# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໙

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໑

## ຂຸດທະກະນິກາຍ ມະຫານິດເທດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຣົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ๗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ๗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໙

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໑

## ຂຸດທະກະນິກາຍ ມະຫານິດເທດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

# ອັດຖະກະວັກ

## ໑. ກາມະສຸດຕະນິດເທດ

### ອະທິບາຍກາມະສູດ

### ວ່າດ້ວຍກາມ ໘ ຢ່າງ

ພຣະສາຣີບຸດເຖຣະຈະກ່າວອະທິບາຍກາມະສູດ ດັ່ງຕໍ່ໄປນີ້

[໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຖ້າກາມນັ້ນສໍາເລັດດ້ວຍດີແກ່ສັດນັ້ນ ຜູ້ຢາກໄດ້ກາມຢູ່
ສັດນັ້ນ ໄດ້ກາມຕາມທີ່ຕ້ອງການແລ້ວ ຍ່ອມເປັນຜູ້ອີ່ມໃຈ

ຄໍາວ່າ ຜູ້ຢາກໄດ້ກາມຢູ່ ອະທິບາຍວ່າ

ຄໍາວ່າ ກາມ ໄດ້ແກ່ ກາມ ໘ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໘) ກິເລດກາມ

ວັດຖຸກາມ ຄືອັນໃດ?

ຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ໜ້າພໍໃຈ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຍິງ ຊາຍ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ທີ່ນາ ທີ່ສວນ ເງິນ ຄໍາ ໝູ່ບ້ານ ນິຄົມ ຣາດ ຊະ

ທານີ ແຄວ້ນ ຊົນນະບົດ ກອງພົນຮົບ ຄັງຫຼວງ ແລະວັດຖຸທີ່ໜ້າຍິນດີຢ່າງໃດ ຢ່າງໜຶ່ງ (ເຫຼົ່ານີ້) ຊື່ວ່າວັດຖຸກາມ

ອີກໄນໜຶ່ງ ກາມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ກາມທີ່ເປັນພາຍໃນ ທີ່ເປັນພາຍນອກ ທີ່ເປັນທັງພາຍໃນແລະພາຍນອກ ກາມຢ່າງຫຍາບ ຢ່າງກາງ ຢ່າງປະນີດ ກາມທີ່ເປັນຂອງສັດໃນອະບາຍ ທີ່ເປັນຂອງມະນຸດ ທີ່ເປັນຂອງທິບ ກາມທີ່ຜາກົດສະເພາະໜ້າ ທີ່ເນຣະມິດຂຶ້ນເອງ ທີ່ບໍ່ໄດ້ເນຣະມິດຂຶ້ນເອງ ທີ່ຜູ້ອື່ນເນຣະມິດໃຫ້ ກາມທີ່ມີຜູ້ ຄອບຄອງ ທີ່ບໍ່ມີຜູ້ຄອບຄອງ ທີ່ຍຶດຖືວ່າເປັນຂອງເຮົາ ທີ່ບໍ່ຍຶດຖືວ່າເປັນຂອງເຮົາ ສະພາວະທຳທີ່ເປັນກາມາວະຈອນ ທີ່ເປັນຣູບປາວະຈອນ ທີ່ເປັນອະຣູບປາວະຈອນ ແມ່ນທັງປວງ ກາມທີ່ເປັນເຫດ ເກີດແຫ່ງຕັນຫາ ເປັນອາລົມແຫ່ງຕັນຫາ ທີ່ຊື່ວ່າກາມ ຍ້ອນມີຄວາມໝາຍວ່າ ໜ້າປາຖະໜາ ໜ້າຍິນດີ ໜ້າລຸ້ມຫຼົງ ເຫຼົ່ານີ້ຮຽກວ່າ ວັດຖຸກາມ

ກິເລດກາມ ຄືອັນໃດ?

ຄື ຄວາມພໍໃຈ ຄວາມກຳໜັດ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ຄວາມດຳຣິ ຄວາມກຳໜັດ ຄວາມກຳໜັດດ້ວຍອຳນາດຄວາມດຳຣິຊື່ວ່າກາມ ໄດ້ແກ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມມີເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍ ອຳນາດຄວາມຕ້ອງການ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເຄື່ອງປະກອບຄືຄວາມຕ້ອງການ ກິເລດເຄື່ອງ ຍຶດໝັ້ນຄືຄວາມຕ້ອງການ ກິເລດເຄື່ອງກັ້ນຈິດຄືຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍ

(ສົມຈິງດັ່ງທີ່ພຣະເຈົ້າອັດຖະມາສົກເປ່ງອຸທານວ່າ)

ເຈົ້າກາມເອີຍ ເຮົາເຫັນຮາກເຫງົ້າຂອງເຈົ້າແລ້ວ  
ເຈົ້າເກີດຍ້ອນຄວາມດຳຣິ ເຮົາຈັກບໍ່ດຳຣິຮອດເຈົ້າອີກ  
ເຈົ້າຈັກບໍ່ສາມາດເກີດມາເປັນແນວນີ້ໄດ້ອີກແລ້ວເຈົ້າກາມເອີຍ  
ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ຜູ້ຢາກໄດ້ກາມຢູ່ ໄດ້ແກ່ ຜູ້ຢາກໄດ້ກາມ ຄື ຜູ້ຕ້ອງການ ຍິນດີ ປາຖະໜາມຸ້ງໝາຍ ມຸ້ງຫວັງກາມຢູ່ ລວມຄວາມວ່າ ຜູ້ຢາກໄດ້ກາມຢູ່

ຄຳວ່າ ຖ້າ ໗ລ໗ແກ່ສັດນັ້ນ ໃນຄຳວ່າ ຖ້າກາມນັ້ນສຳເລັດດ້ວຍດີແກ່ສັດນັ້ນ

ອະທິບາຍວ່າ ສັດນັ້ນ ຄື ຜູ້ເປັນກະສັດ ພາມ ແພດ ສູດ ຄະລຶຫັດ ບັນພະຊິດ ເທວະດາ ຫຼືມະນຸດ

ຄຳວ່າ ກາມນັ້ນ ໄດ້ແກ່ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະທີ່ໜ້າພໍໃຈ ຮຽກວ່າ ວັດຖຸກາມ

ຄຳວ່າ ສຳເລັດດ້ວຍດີ ໄດ້ແກ່ ສຳເລັດຜົນ ສຳເລັດດ້ວຍດີ ໄດ້ ໄດ້ຮັບ ສົມຫວັງ ປະສົບ ລວມຄວາມວ່າ ຖ້າກາມນັ້ນສຳເລັດດ້ວຍດີແກ່ສັດນັ້ນ

ຄຳວ່າ ແນ່ນອນ ໃນຄຳວ່າ ຍ່ອມເປັນຜູ້ອີ່ມໃຈແນ່ນອນ ເປັນຄຳກ່າວໂດຍໄນດຽວ ເປັນຄຳກ່າວໂດຍບໍ່ສົງໄສ ເປັນຄຳກ່າວໂດຍບໍ່ເຄືອບແຄງ ເປັນຄຳກ່າວໂດຍບໍ່ເປັນ ໔ ໄນ ເປັນຄຳກ່າວໂດຍບໍ່ເປັນ ໔ ຢ່າງ ເປັນຄຳກ່າວໂດຍຮັດກຸມ ເປັນຄຳກ່າວໂດຍ ບໍ່ຜິດ ຄຳວ່າ ແນ່ນອນ ນີ້ ເປັນຄຳກ່າວທີ່ກຳນົດໄວ້ແນ່ນອນແລ້ວບໍ່ເປັນອື່ນອີກ

ຄຳວ່າ ອີ່ມ ໄດ້ແກ່ ຄວາມອີ່ມເອີບ ຄວາມປາໂມດ ຄວາມບັນເທີງ ຄວາມເບີກບານ ຄວາມຣ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຍິນດີ ຄວາມມີໃຈສູງ ຄວາມມີໃຈ ແຊ່ມຊື່ນ ຄວາມເຕັມໃຈ ທີ່ປະກອບດ້ວຍກາມມະຄຸນ ໕

ຄຳວ່າ ໃຈ ໄດ້ແກ່ ຈິດ ມະໂນ ມານັດ ຫົວໃຈ ປັນຖະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດ ທີ່ເກີດຈາກຜັດສະເປັນຕົ້ນນັ້ນ ນີ້ຮຽກວ່າ ໃຈ ໃຈນີ້ ໄປພ້ອມກັນ ຄື ເກີດຮ່ວມກັນ ຣະຄົນກັນ ກ່ຽວເນື່ອງກັນ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸຢ່າງດຽວກັນ ມີອາລົມຢ່າງດຽວກັນກັບຄວາມອີ່ມເອີບນີ້

ຄຳວ່າ ຍ່ອມເປັນຜູ້ອີ່ມໃຈ ໄດ້ແກ່ ເປັນຜູ້ອີ່ມໃຈ ຄື ເປັນຜູ້ມີໃຈຍິນດີ ມີໃຈຣ່າເຣີງ ມີໃຈເບີກບານ ມີໃຈແຊ່ມຊື່ນ ມີໃຈສູງ ບັນເທີງໃຈ ຍິນດີໃຈ ລວມຄວາມວ່າ ຍ່ອມເປັນຜູ້ອີ່ມໃຈແນ່ນອນ

ຄຳວ່າ ໄດ້ ໃນຄຳວ່າ ສັດນັ້ນໄດ້ກາມຕາມທີ່ຕ້ອງການແລ້ວ ໄດ້ແກ່ ໄດ້ ຄື ໄດ້ແລ້ວ ໄດ້ຮັບແລ້ວ ສົມຫວັງແລ້ວ ປະສົບແລ້ວ

ຄຳວ່າ ສັດ ໄດ້ແກ່ ສັດ (ຜູ້ຂ້ອງຢູ່) ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ກາມຕາມທີ່ຕ້ອງການ ໄດ້ແກ່ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ຕາມທີ່ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ລວມຄວາມວ່າ ສັດນັ້ນໄດ້ກາມຕາມທີ່ຕ້ອງການແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຖ້າກາມນັ້ນສຳເລັດດ້ວຍດີແກ່ສັດນັ້ນ ຜູ້ຢາກໄດ້ກາມຢູ່
ສັດນັ້ນໄດ້ກາມຕາມທີ່ຕ້ອງການແລ້ວ ຍ່ອມເປັນຜູ້ອີ່ມໃຈແນ່ນອນ

[໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຖ້າເມື່ອສັດນັ້ນຢາກໄດ້ກາມຢູ່
ເກີດຄວາມພໍໃຈແລ້ວ ກາມເຫຼົ່ານັ້ນເສື່ອມໄປ
ສັດນັ້ນຍ່ອມເຈັບປວດ ເໝືອນຖືກລູກສອນແທງ

ຄຳວ່າ ຖ້າເມື່ອສັດນັ້ນ ໃນຄຳວ່າ ຖ້າເມື່ອສັດນັ້ນຢາກໄດ້ກາມຢູ່ ໄດ້ແກ່ ເມື່ອ ສັດນັ້ນ ຄື ຜູ້ເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດ

ຄຳວ່າ ຢາກໄດ້ກາມຢູ່ ໄດ້ແກ່ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ກາມຢູ່

ອີກໄນໜຶ່ງ ສັດຍ່ອມໄປ ອອກໄປ ຖືກພາໄປ ຖືກນຳໄປ ຍ້ອນການຕັນຫາ ອະທິບາຍ ວ່າ ເໝືອນມະນຸດຍ່ອມໄປ ອອກໄປ ຖືກພາໄປ ຖືກນຳໄປ ດ້ວຍຍານພາຫະນະ ຄື ຊ້າງ ມ້າ ງົວ ແບ້ ແກະ ອູດ ຫຼື ລາ ສັນໃດ ສັດຍ່ອມໄປ ອອກໄປ ຖືກພາໄປ ຖືກນຳໄປ ຍ້ອນການຕັນ ຫາ ສັນນັ້ນຄືກັນ ລວມຄວາມວ່າ ຖ້າເມື່ອສັດນັ້ນຢາກໄດ້ກາມຢູ່

ຄຳວ່າ ເມື່ອສັດ ຯລຯເກີດຄວາມພໍໃຈແລ້ວ ອະທິບາຍວ່າ

ຄຳວ່າ ຄວາມພໍໃຈ ໄດ້ແກ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດ ດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍອຳນາດຄວາມຕ້ອງການ ຄວາມທະຍານ ຢາກ ດ້ວຍອຳນາດຄວາມຕ້ອງການ ຄວາມມີເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນ ຮົນດ້ວຍອຳນາດ ຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈ ດ້ວຍອຳນາດຄວາມຕ້ອງການ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເຄື່ອງປະກອບຄືຄວາມຕ້ອງ ການ ກິເລດເຄື່ອງຍຶດໝັ້ນຄືຄວາມຕ້ອງການ ກິເລດເຄື່ອງກັ້ນຈິດຄືຄວາມພໍໃຈດ້ວຍອຳນາດ ຄວາມຕ້ອງການໃນກາມທັງຫຼາຍ ຄວາມພໍໃຈ ດ້ວຍອຳນາດຄວາມຕ້ອງການເກີດແລ້ວ ເກີດຂຶ້ນ ແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວ ແກ່ສັດນັ້ນ

ຄຳວ່າ ສັດ ໄດ້ແກ່ ສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດຜູ້ ເປັນໄປຕາມກຳ ມະນຸດ ລວມຄວາມວ່າ ເມື່ອສັດ ຯລຯເກີດຄວາມພໍໃຈແລ້ວ

ຄຳວ່າ ກາມເຫຼົ່ານັ້ນເສື່ອມໄປ ໄດ້ແກ່ ກາມເຫຼົ່ານັ້ນເສື່ອມໄປ ຫຼື ສັດນັ້ນເສື່ອມ ຈາກ ກາມທັງຫຼາຍ

ກາມເຫຼົ່ານັ້ນ ເສື່ອມໄປໄດ້ແນວໃດ?

ຄື ເມື່ອສັດນັ້ນດຳຣົງຊີບຢູ່ນັ້ນເອງ ໂພຄະຊັບພິນາດຍ້ອນເຫດ ໗ ປະການ ຄື

໑. ຖືກພຣະຣາຊາຢຶດ
໒. ຖືກໂຈນປຸ້ນ
໓. ຖືກໄຟໄໝ້
໔. ຖືກນ້ຳຖ້ວມພັດພາໄປ
໕. ຖືກທາຍາດຜູ້ບໍ່ເປັນທີ່ຮັກລັກເອົາໄປ

ຜ. ໂພຄະຊັບທີ່ຝັງໄວ້ແລ້ວຫາບໍ່ພົບ

ກ. ກິດຈະການລົ້ມເຫຼວຍ້ອນຈັດການບໍ່ດີ

ຕ. ມີຄົນລ້າງຜານຕະກູນ ລ້າງຜານ ຮຸກຮານ ທຳລາຍໂພຄະຊັບເຫຼົ່ານັ້ນໃຫ້ພິນາດ ເກີດຂຶ້ນໃນຕະກູນ

ກາມເຫຼົ່ານັ້ນ ເສຍໄປ ເສື່ອມໄປ ຄື ສິ້ນໄປ ໝົດໄປ ສູນຫາຍໄປ ສະຫຼາຍໄປດ້ວຍອາການ ຢ່າງນີ້

ສັດນັ້ນ ເສື່ອມຈາກກາມທັງຫຼາຍໄດ້ແນວໃດ?

ຄື ເມື່ອໂພຄະຊັບເຫຼົ່ານັ້ນຍັງຄົງຢູ່ຄືເກົ່າ ແຕ່ສັດຜູ້ຄອງນັ້ນເຄື່ອນໄປ ຕາຍ ສູນຫາຍໄປ ສະຫຼາຍໄປ ສັດນັ້ນຍ່ອມເສຍໄປ ເສື່ອມໄປ ຄື ສິ້ນໄປ ໝົດໄປ ສູນຫາຍໄປ ສະຫຼາຍໄປຈາກກາມທັງຫຼາຍ ດ້ວຍອາການແນວນີ້

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ໂພຄະຊັບຖືກໂຈນປຸ້ນ ພຣະຣາຊາຢຶດເອົາໄປ ໄຟໄໝ້ ເສຍຫາຍ
ອັນໜຶ່ງ ບຸກຄົນຜູ້ເປັນເຈົ້າຂອງຍ່ອມປະຖິ້ມສະຣີຣະຮ່າງກາຍຂອງຕົນ
ພ້ອມທັງຊັບສິນໄປຍ້ອນຄວາມຕາຍມາຮອດ
ນັກປາດຮູ້ດັ່ງນີ້ແລ້ວເພິ່ງໃຊ້ສອຍແລະໃຫ້ທານ
ເມື່ອໃຫ້ທານແລະໃຊ້ສອຍຕາມສົມຄວນແລ້ວ
ຈຶ່ງບໍ່ຖືກນິນທາ ຍ່ອມເຂົ້າເຖິງສະຫວັນ
ລວມຄວາມວ່າ ກາມເຫຼົ່ານັ້ນເສື່ອມໄປ

ຄຳວ່າ ສັດນັ້ນຍ່ອມເຈັບປວດເໝືອນຖືກລູກສອນແທງ ອະທິບາຍວ່າ ສັດຜູ້ຖືກລູກສອນເຫຼັກແທງກໍຕາມ ຖືກລູກສອນກະດູກ ລູກສອນງາ ລູກສອນເຂົາ ຫຼືລູກສອນໄມ້ແທງກໍຕາມ ຍ່ອມເຈັບປວດ ດິ້ນຣົນ ກະສັບກະສ່າຍ ເດືອດຮ້ອນ ເຈັບກາຍ ເຈັບໃຈ ສັນໃດ ຍ້ອນວັດຖຸກາມປ່ຽນເປັນອື່ນໄປ ຄວາມເສົ້າໂສກ ຄວາມຮ່ຳໄຮ ຄວາມທຸກກາຍ ຄວາມທຸກໃຈ ຄວາມຄັບແຄ້ນໃຈຍ່ອມເກີດຂຶ້ນ ສັນນັ້ນຄືກັນ ສັດນັ້ນຖືກລູກສອນຄືກາມ ແລະລູກສອນຄືຄວາມເສົ້າໂສກແທງແລ້ວ ຍ່ອມເຈັບປວດ ດິ້ນຣົນ ກະສັບກະສ່າຍ ເດືອດຮ້ອນ ເຈັບກາຍ ເຈັບໃຈ ລວມຄວາມວ່າ ສັດນັ້ນຍ່ອມເຈັບປວດເໝືອນຖືກລູກສອນແທງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຖ້າເມື່ອສັດນັ້ນຢາກໄດ້ກາມຢູ່ ເກີດຄວາມພໍໃຈແລ້ວ
ເມື່ອກາມເຫຼົ່ານັ້ນເສື່ອມໄປ ສັດນັ້ນຍ່ອມເຈັບປວດ
ເໝືອນຖືກລູກສອນແທງ

[໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຜູ້ໃດລະກາມໄດ້ ເໝືອນຄົນຍ່າງລ່ຽງຫົວງູ
ຜູ້ນັ້ນມີສະຕິ ລ່ວງພົ້ນຕັນຫາທີ່ຊື່ວ່າວິສັດຕິການີ້ໃນໂລກ

## ວ່າດ້ວຍການລະກາມໂດຍເຫດ ໒ ຢ່າງ

ຄຳວ່າ ຜູ້ໃດ ໃນຄຳວ່າ ຜູ້ໃດລະກາມໄດ້ ໄດ້ແກ່ ຜູ້ໃດ ຄື ຜູ້ເຊັ່ນໃດ ຜູ້ຂວນຂວາຍຢ່າງໃດ ຜູ້ຕັ້ງໃຈແນວໃດ ຜູ້ມີປະການແນວໃດ ຜູ້ເຖິງຖານະໃດ ຜູ້ປະກອບດ້ວຍທຳໃດ ຈະເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼືມະນຸດກໍຕາມ

ຄຳວ່າ ລະກາມໄດ້ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ[1]

ຄຳວ່າ ລະກາມໄດ້ ໄດ້ແກ່ ລະກາມໄດ້ໂດຍເຫດ ໒ ຢ່າງ ຄື (໑) ໂດຍການຂົ່ມໄວ້ (໒) ໂດຍການຕັດຂາດ

ບຸກຄົນລະກາມໄດ້ໂດຍການຂົ່ມໄວ້ ເປັນແນວໃດ?

ຄື ບຸກຄົນເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຮ່າງໂຄງກະດູກ ຍ້ອນໃຫ້ຄວາມຍິນດີເລັກໜ້ອຍ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຕ່ອນຊີ້ນ ຍ້ອນເປັນຂອງທົ່ວໄປແກ່ຄົນສ່ວນຫຼາຍ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນທວນໄຟຫຍ້າ ຍ້ອນໄໝ້ ລຸກລາມໄດ້ໄວຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຂຸມຖ່ານໄຟ ຍ້ອນມີຄວາມຮ້ອນຫຼາຍຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຄວາມຝັນ ຍ້ອນຜາກົດພຽງເວລາອັນສັ້ນ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຂອງທີ່ຢືມມາ ຍ້ອນເປັນຂອງຄອບຄອງຊົ່ວເວລາຕາມກຳນົດ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນໝາກໄມ້ຄາຕົ້ນ ຍ້ອນເປັນເຫດ ໃຫ້ຫັກແລະໃຫ້ລົ້ມໄດ້ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຂຽງຟັກຊີ້ນ ຍ້ອນເປັນເຄື່ອງຮອງຮັບການຟັກການຊອຍ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຫອກຫຼາວ ຍ້ອນເປັນເຄື່ອງສຽບແທງ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ການທັງຫຼາຍປຽບເໝືອນຫົວງູ ຍ້ອນເປັນສິ່ງມີໄພ ສະເພາະໜ້າ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນກອງໄຟ ຍ້ອນເຜົາຜານ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

## ວ່າດ້ວຍບຸກຄົນທີ່ລະກາມໄດ້ໂດຍການຂົ່ມໄວ້ ໑໐ ຈຳພວກ

໑. ບຸກຄົນກຳລັງຈະເລີນ ພຸດທານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໒. ບຸກຄົນກຳລັງຈະເລີນ ທຳມານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໓. ບຸກຄົນກຳລັງຈະເລີນ ສັງຄານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໔. ບຸກຄົນກຳລັງຈະເລີນ ສີລານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໕. ບຸກຄົນກຳລັງຈະເລີນ ຈາຄານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໖. ບຸກຄົນກຳລັງຈະເລີນ ເທວະຕານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໗. ບຸກຄົນກຳລັງຈະເລີນ ອານາປານັດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໘. ບຸກຄົນກຳລັງຈະເລີນ ມະຣະນານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໙. ບຸກຄົນກຳລັງຈະເລີນ ກາຍະຄະຕາສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໑໐. ບຸກຄົນກຳລັງຈະເລີນ ອຸປະສະມານຸດສະຕິ ຍ່ອມລະກາມໄດ້ໂດຍການຂົ່ມໄວ້

## ວ່າດ້ວຍບຸກຄົນທີ່ລະກາມໄດ້ໂດຍການຂົ່ມໄວ້ ໘ ຈຳພວກ

໑. ບຸກຄົນກຳລັງຈະເລີນ ປະຖົມຊານ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໒. ບຸກຄົນກຳລັງຈະເລີນ ທຸຕິຍະຊານ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໓. ບຸກຄົນກຳລັງຈະເລີນ ຕະຕິຍະຊານ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໔. ບຸກຄົນກຳລັງຈະເລີນ ຈະຕຸດຖະຊານ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໕. ບຸກຄົນກຳລັງຈະເລີນ ອາກາສານັນຈາຍະຕະນະສະມາບັດ ຍ່ອມລະກາມໄດ້ໂດຍການຂົ່ມໄວ້
໖. ບຸກຄົນກຳລັງຈະເລີນ ວິນຍານັນຈາຍະຕະນະສະມາບັດ ຍ່ອມລະກາມໄດ້ໂດຍການ ຂົ່ມໄວ້
໗. ບຸກຄົນກຳລັງຈະເລີນ ອາກິນຈັນຍາຍະຕະນະສະມາບັດ ຍ່ອມລະກາມໄດ້ໂດຍການ ຂົ່ມໄວ້

๗. ບຸກຄົນກຳລັງຈະເລີນ ເນວະສັນຍານາສັນຍາຍະຕະນະສະມາບັດ ຍ່ອມລະການ ໄດ້ໂດຍການຂົ່ມໄວ້

ບຸກຄົນຊື່ວ່າລະການໄດ້ໂດຍການຂົ່ມໄວ້ ເປັນແນວນີ້

## ວ່າດ້ວຍບຸກຄົນທີ່ລະການໄດ້ໂດຍການຕັດຂາດ ໔ ຈຳພວກ

ບຸກຄົນລະການໄດ້ໂດຍການຕັດຂາດ ເປັນແນວໃດ? ຄື

໑. ບຸກຄົນກຳລັງຈະເລີນໂສດາປັດຕິມັກ ຍ່ອມລະການອັນເປັນເຫດໄປສູ່ອະບາຍໄດ້ ໂດຍການຕັດຂາດ

໔. ບຸກຄົນກຳລັງຈະເລີນສະກະທາຄາມິມັກ ຍ່ອມລະການຢ່າງຫຍາບໄດ້ໂດຍການ ຕັດຂາດ

໓. ບຸກຄົນກຳລັງຈະເລີນອະນາຄາມິມັກ ຍ່ອມລະການຢ່າງລະອຽດໄດ້ໂດຍການ ຕັດຂາດ

໔. ບຸກຄົນກຳລັງຈະເລີນອະຣະຫັດຕະມັກ ຍ່ອມລະການໄດ້ໝົດສິ້ນ ບໍ່ເຫຼືອທຸກສິ່ງ ທຸກປະການ ໂດຍການຕັດຂາດ

ບຸກຄົນຊື່ວ່າລະການໄດ້ໂດຍການຕັດຂາດ ເປັນແນວນີ້ ລວມຄວາມວ່າຜູ້ໃດລະການໄດ້

ຄຳວ່າ ເໝືອນຄົນຍ່າງລ່ຽງຫົວງູ ອະທິບາຍວ່າ ງູ ຮຽກວ່າ ສັບປະ ງູຊື່ວ່າ ສັບປະຍ້ອນ ມີຄວາມໝາຍແນວໃດ ງູຊື່ວ່າ ສັບປະ ຍ້ອນເລືອໄປ ຊື່ວ່າ ພຸຊະຄະ ຍ້ອນເລືອໄປດ້ວຍຂົດ ຊື່ ວ່າ ອຸຣະຄະ ຍ້ອນໄປດ້ວຍເອິກ ຊື່ວ່າປັນນະຄະ ຍ້ອນມຸດຫົວໄປ ຊື່ວ່າ ສິຣີສະປະ ຍ້ອນນອນ ພາດຫົວເທິງຂົດ ຊື່ວ່າ ພິລາສະຍະ ຍ້ອນນອນໃນຮູ ຊື່ວ່າ ຄຸຫາສະຍະ ຍ້ອນນອນໃນຖ້ຳ ຊື່ວ່າ ທາຖາວຸທະ ຍ້ອນມີແຂ້ວເປັນອາວຸດ ຊື່ວ່າງົວ ຣະວິສະ ຍ້ອນມີພິດຮ້າຍແຮງ ຊື່ວ່າ ທຸຊິວະຫາ ຍ້ອນມີລີ້ນ ໔ ແສກ ຊື່ວ່າ ທິນະສັນຍູ ຍ້ອນຊິມຣົດດ້ວຍລີ້ນ ໔ ແສກ ບຸຣຸດຜູ້ປາຖະໜາຈະມີ ຊີວິດຢູ່ ບໍ່ຢາກຕາຍ ຮັກສຸກ ກຽດຊັງທຸກ ເພິ່ງຍ່າງຫຼີບ ຫຼີກ ລ່ຽງ ບ່ຽງໜີຫົວງູ ສັນໃດ ບຸກຄົນຜູ້ ຮັກສຸກ ກຽດຊັງທຸກ ເພິ່ງຫຼີບ ຫຼີກ ລ່ຽງ ບ່ຽງໜີ ການທັງຫຼາຍ ກໍສັນນັ້ນຄືກັນ ລວມຄວາມວ່າ ເໝືອນຄົນຍ່າງລ່ຽງຫົວງູ

ຄຳວ່າ ຜູ້ນັ້ນ ໃນຄຳວ່າ ຜູ້ນັ້ນມີສະຕິ ລ່ວງພົ້ນຕັນຫາທີ່ຊື່ວ່າວິສັດຕິການີ້ໃນໂລກ ໄດ້ແກ່ ຜູ້ລະການໄດ້ ຕັນຫາຕັດຮຽກວ່າ ວິສັດຕິກາ

ຄື ຄວາມກຳໜັດ ຄວາມກຳໜັດແຮງ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມ ເພີດເພີນ ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄວາມກຳໜັດແຮງແຫ່ງຈິດ ຄວາມຢາກ ຄວາມສະຍົບ ຄວາມມຶກມຸ້ນ ຄວາມທື່ນ ຄວາມທື່ນກະຫາຍ ຄວາມຂ້ອງຢູ່ ຄວາມຈົມຢູ່ ທຳມະ

ຊາດທີ່ເຮັດໃຫ້ພຸກພ່ານ ທຳມະຊາດທີ່ຫຼອກລວງ ທຳມະຊາດທີ່ຍັງສັດໃຫ້ເກີດ ທຳມະຊາດທີ່ຍັງສັດໃຫ້ເກີດພ້ອມ ທຳມະຊາດທີ່ຮ້ອຍຮັດ ທຳມະຊາດທີ່ມີຂ່າຍ ທຳມະຊາດທີ່ກຳຊາບໃຈ ທຳມະຊາດທີ່ຊ່ານໄປ ທຳມະຊາດເປັນຄືເສັ້ນດ້າຍ ທຳມະຊາດທີ່ແຜ່ໄປ ທຳມະຊາດທີ່ປະມວນມາ ທຳມະຊາດທີ່ເປັນເພື່ອນ ຄວາມຄະນຶງຫາ ຕັນຫາທີ່ນຳພາໄປສູ່ພົບ ຕັນຫາເປັນຄືປ່າ ຕັນຫາເປັນຄືປ່າທຶບ ຄວາມເຊີຍຊິດ ຄວາມມີເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງ ກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງໃນຮູບ ຄວາມຫວັງໃນສຽງ ຄວາມຫວັງໃນກິ່ນ ຄວາມຫວັງໃນຣົດ ຄວາມຫວັງໃນໂຜດຖັບພະ ຄວາມຫວັງໃນລາບ ຄວາມຫວັງໃນຊັບ ຄວາມຫວັງໃນບຸດ ຄວາມຫວັງໃນຊີວິດ ທຳມະຊາດທີ່ຊຶ່ມ ທຳມະຊາດທີ່ຊຶ່ມຢູ່ເລື້ອຍ ໆ ທຳມະຊາດທີ່ຊຶ່ມຍິ່ງ ຄວາມຊຶ່ມ ກິຣິຍາທີ່ຊຶ່ມ ພາວະທີ່ຊຶ່ມ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່ລະໂມບ ທຳມະຊາດທີ່ເຮັດໃຫ້ຫວັ່ນໄຫວ ພາວະທີ່ຕ້ອງການແຕ່ອາລົມດີ ໆ ຄວາມກຳໜັດໃນຖານະອັນບໍ່ຄວນ ຄວາມໂລບເກີນພໍດີ ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມໃຝ່ຫາ ຄວາມໝາຍປອງການຕັນຫາ ພະວະຕັນຫາ ວິພະວະຕັນຫາ ຕັນຫາໃນຮູບພົບ ຕັນຫາໃນອະຮູບພົບ ຕັນຫາໃນນິໂຣດ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣາສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກ ອຸປະກິເລດ ອະນຸໄສ ປະຣິຍຸດຖານ (ກິເລດທີ່ກຸ້ມລຸມຈິດ) ຕັນຫາເປັນຄືເຄືອເຂົາ ຄວາມປາຖະໜາວັດຖຸຕ່າງ ໆ ຮາກເຫງົ້າແຫ່ງທຸກ ເຫດແຫ່ງທຸກ ແດນເກີດແຫ່ງທຸກ ບ້ວງແຫ່ງມານ ເບັດແຫ່ງມານ ວິໄສແຫ່ງມານ ຕັນຫາເປັນຄືແມ່ນ້ຳ ຕັນຫາ ເປັນຄືຕາໜ່າງ ຕັນຫາເປັນຄືໂຊ້ຕອນ ຕັນຫາເປັນຄືມະຫາສະມຸດ ອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ) ອະກຸສົນມູນຄືໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍ ແນວໃດຕັນຫາຊື່ວ່າວິສັດຕິກາ ຍ້ອນແຜ່ໄປ ຊື່ວ່າວິສັດຕິກາ ຍ້ອນຊ່ານໄປ ຊື່ວ່າ ວິສັດຕິກາ ຍ້ອນຂະຫຍາຍໄປ ຊື່ວ່າວິສັດຕິກາ ຍ້ອນຄອບງຳ ຊື່ວ່າວິສັດຕິກາ ຍ້ອນສະທ້ອນໄປ ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ເວົ້າຜິດ ຊື່ວ່າວິສັດຕິກາ ຍ້ອນມີຮາກເປັນພິດ ຊື່ວ່າວິສັດຕິກາ ຍ້ອນມີຜົນເປັນພິດ ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ບໍຣິໂພກສິ່ງມີພິດ

ອີກໄນໜຶ່ງ ຕັນຫານັ້ນແຜ່ໄປ ຄື ຊ່ານໄປ ຂະຫຍາຍໄປໃນ ຮູບ ສຽງ ກິ່ນ ຣົດ ໂຜຖັບພະ ຕະກູນ ໝູ່ຄະນະ ອາວາດ ລາບ ຍົດ ສັນເສີນ ສຸກ ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ກາມທາດ ຮູບທາດ ອະຮູບທາດ ກາມາພົບ ຮູບພົບ ອະຮູບພົບ ສັນຍາພົບ ອະສັນຍາພົບ ເນວະສັນຍານາສັນຍາພົບ ເອກະໂວກາຣະພົບ ຈະຕຸໂວກາຣະພົບ ປັນຈະໂວກາຣະພົບ[໖] ອະດີດ ອະນາຄົດ ປັດຈຸບັນ ຮູບທີ່ເຫັນແລ້ວ ສຽງທີ່ໄດ້ຍິນແລ້ວ ກິ່ນ ຣົດ ໂຜດຖັບພະ ທີ່ຮັບຮູ້ແລ້ວ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ດັ່ງນັ້ນ ຈຶ່ງຊື່ວ່າວິສັດຕິກາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ(ໂລກຄື ຂັນ ໕) ທາດໂລກ (ໂລກຄືທາດ ໑໘) ອາຍະຕະນະໂລກ (ໂລກຄືອາຍະຕະນະ ໑໒)

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
໒. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
໓. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
໔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນເວັ້ນຈາກຄວາມເປັນຜູ້ບໍ່ມີສະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ເຮັດສິ່ງທັງຫຼາຍທີ່ຄວນເຮັດດ້ວຍສະຕິ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ກຳຈັດສິ່ງທັງຫຼາຍທີ່ເປັນຝ່າຍກົງກັນຂ້າມກັບສະຕິ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ບໍ່ຫຼົງລືມທຳທັງຫຼາຍທີ່ເປັນມູນເຫດແຫ່ງສະຕິ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນເປັນຜູ້ພຽບພ້ອມດ້ວຍສະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ຊຳນານໃນສະຕິ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ຄ່ອງແຄ່ວໃນສະຕິ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ບໍ່ທອນກັບຈາກສະຕິ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນມີຢູ່ຕາມປົກກະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ສະງົບ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ຣະງັບ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ປະກອບດ້ວຍທຳຂອງສັດຕະບຸຣຸດ

(ມີສະຕິດ້ວຍເຫດອີກ ໑໐ ຢ່າງ ຄື)

໑. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງພຸດທະຄຸນ
໒. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງທຳຄຸນ
໓. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງສັງຄະຄຸນ

໔. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງສິນທີ່ຕົນຮັກສາ
໕. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງທານທີ່ຕົນບໍລິຈາກແລ້ວ
໖. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງຄຸນທີ່ເຮັດຄົນໃຫ້ເປັນເທວະດາ
໗. ຊື່ວ່າມີສະຕິ ຍ້ອນຕັ້ງສະຕິກຳນົດລົມຫັນໃຈເຂົ້າອອກ
໘. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງຄວາມຕາຍທີ່ຈະຕ້ອງມີເປັນທຳມະດາ
໙. ຊື່ວ່າມີສະຕິ ຍ້ອນຣະນຶກທົ່ວໄປໃນກາຍ (ໃຫ້ເຫັນວ່າບໍ່ງາມ)
໑໐. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງທຳເປັນທີ່ສະງົບຣະງັບ (ກິເລດແລະຄວາມທຸກ) ຄື ນິບພານ

ສະຕິ ຄື ຄວາມຕາມຣະນຶກເຖິງ ຄວາມຣະນຶກໄດ້ສະເພາະໜ້າ ສະຕິ ຄື ຄວາມຣະນຶກໄດ້ ຄວາມຈຳໄດ້ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ຄື ສະຕິນຊີ (ສະຕິທີ່ເປັນໃຫຍ່) ສະຕິພະລະ (ສະຕິທີ່ເປັນກຳລັງ) ສຳມາສະຕິ (ຣະນຶກຊອບ) ສະຕິສຳໂພດຊົງ (ສະຕິທີ່ເປັນອົງແຫ່ງການຕັດສະຣູ້ທຳ) ເອກາຍະນະມັກ (ສະຕິທີ່ເປັນທາງເອກ) ນີ້ແລ ຕັດຮຽກວ່າສະຕິ ບຸກຄົນຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍສະຕິນີ້ ຜູ້ນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າຜູ້ມີສະຕິ

ຄຳວ່າ ຜູ້ນັ້ນມີສະຕິ ລ່ວງພົ້ນຕັນຫາທີ່ຊື່ວ່າວິສັດຕິການີ້ໃນໂລກ ອະທິບາຍວ່າ ຜູ້ມີສະຕິຍ່ອມຂ້າມ ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຕັນຫາທີ່ຊື່ວ່າວິສັດຕິການີ້ໃນໂລກ ລວມຄວາມວ່າ ຜູ້ນັ້ນມີສະຕິ ລ່ວງພົ້ນຕັນຫາທີ່ຊື່ວ່າວິສັດຕິການີ້ໃນໂລກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຜູ້ໃດລະກາມໄດ້ ເໝືອນຄົນຍ່າງຫຼີກຫົວງູ
ຜູ້ນັ້ນມີສະຕິ ລ່ວງພົ້ນຕັນຫາທີ່ຊື່ວ່າວິສັດຕິການີ້ໃນໂລກ

[໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນໍຣະຊົນໃດ ປາຖະໜາເນືອງ ໆ ເຊິ່ງໄຮ່ນາ ທີ່ດິນ ເງິນ
ງົວ ມ້າ ທາດ ບຸຣຸດ ສະຕີ ພວກພ້ອງ ຫຼື ກາມຈຳນວນຫຼາຍ

ຄຳວ່າ ໄຮ່ນາ ໃນຄຳວ່າ ໄຮ່ນາ ທີ່ດິນ ເງິນ ໄດ້ແກ່ ນາເຂົ້າສາລີ ນາເຂົ້າ ໄຮ່ຖົ່ວຂຽວ ໄຮ່ຖົ່ວແປບ ນາເຂົ້າໜຽວ ນາເຂົ້າລະມານ ໄຮ່ງາ

ຄຳວ່າ ທີ່ດິນ ໄດ້ແກ່ ທີ່ປູກເຮືອນ ທີ່ສ້າງຢຸ້ງສາງ ທີ່ໜ້າເຮືອນ ທີ່ຫຼັງເຮືອນ ທີ່ສວນ ທີ່ຢູ່

ຄຳວ່າ ເງິນ ໄດ້ແກ່ ຫຼຽນກະສາບ ຕັດຮຽກວ່າ ເງິນ ລວມຄວາມວ່າ ໄຮ່ນາ ທີ່ດິນ ເງິນ

ຄຳວ່າ ງົວ ມ້າ ທາດ ບຸຣຸດ ມີອະທິບາຍດັ່ງນີ້ ງົວທັງຫຼາຍຕັດຮຽກວ່າ ງົວ ສັດທັງຫຼາຍມີປະສຸສັດເປັນຕົ້ນຕັດຮຽກວ່າ ມ້າ

ຄຳວ່າ ທາດ ໄດ້ແກ່ ທາດ ໔ ຈຳພວກ ຄື

໑. ທາດທີ່ເກີດພາຍໃນ (ທາດໃນເຮືອນເບ້ຍ)
໒. ທາດທີ່ຊື້ມາດ້ວຍຊັບ (ທາດສິນໄຖ່)
໓. ຜູ້ສະໝັກເປັນທາດເອງ
໔. ຊະເລີຍທີ່ຕົກເປັນທາດ

(ສົມຈິງດັ່ງທີ່ວິທູນບັນດິດໂພທິສັດກ່າວໄວ້ວ່າ)

ຄົນບາງພວກເປັນທາດໂດຍກຳເນີດ
ບາງພວກເປັນທາດທີ່ເຂົາຊື້ມາດ້ວຍຊັບ
ບາງພວກສະໝັກເຂົ້າເປັນທາດເອງ
ບາງພວກຕົກເປັນຊະເລີຍຈຶ່ງຍອມເປັນທາດ

ຄຳວ່າ ບຸຣຸດ ໄດ້ແກ່ ບຸຣຸດ ໓ ຈຳພວກ ຄື

໑. ລູກຈ້າງ
໒. ກຳມະກອນ
໓. ພວກຢູ່ອາໄສ ລວມຄວາມວ່າ ງົວ ມ້າ ທາດ ບຸຣຸດ

ຄຳວ່າ ສະຕິ ພວກພ້ອງ ຫຼືການເປັນຈຳນວນຫຼາຍ ມີອະທິບາຍດັ່ງນີ້ ຍິງທີ່ມີຜູ້ຄຸ້ມຄອງ ຕັດຮຽກວ່າ ສະຕີ

ຄຳວ່າ ພວກພ້ອງ ໄດ້ແກ່ ພວກພ້ອງ ໔ ຈຳພວກ ຄື

໑. ພວກພ້ອງໂດຍຄວາມເປັນຍາດ
໒. ພວກພ້ອງໂດຍສືບຕະກູນ
໓. ພວກພ້ອງໂດຍການຮ່ວມຮຽນມົນ
໔. ພວກພ້ອງໂດຍການຮ່ວມຮຽນສິລະປະວິທະຍາ

ຄຳວ່າ ການເປັນຈຳນວນຫຼາຍ ອະທິບາຍວ່າ ການຫຼາຍຢ່າງ ການຫຼາຍຢ່າງເຫຼົ່ານີ້ ຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະທີ່ໜ້າພໍໃຈ ລວມຄວາມວ່າ ສະຕີ ພວກພ້ອງ ຫຼື ການເປັນຈຳນວນຫຼາຍ

ຄຳວ່າ ໃດ ໃນຄຳວ່າ ນໍຣະຊົນໃດປາຖະໜາເນືອງ ໆ ອະທິບາຍວ່າ ຜູ້ໃດ ຜູ້ເຊັ່ນໃດ ຜູ້ຂວນຂວາຍແນວໃດ ຜູ້ຕັ້ງໃຈແນວໃດ ຜູ້ມີປະການແນວໃດ ຜູ້ເຂົ້າເຖິງຖານະແນວໃດ ຜູ້ປະກອບດ້ວຍທຳໃດ ຈະເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດກໍຕາມ

ຄຳວ່າ ນໍຣະຊົນ ໄດ້ແກ່ ສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ປາຖະໜາເນືອງ ໆ ໄດ້ແກ່ ປາຖະໜາ ປາຖະໜາສະເໝີ ໆ ປາຖະໜາທົ່ວໄປ ປາຖະໜາຍິ່ງ ໆ ຂຶ້ນໄປ ໃນວັດຖຸກາມຍ້ອນກິເລດກາມ ລວມຄວາມວ່າ ນໍຣະຊົນໃດປາຖະໜາເນືອງ ໆ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ນໍຣະຊົນໃດປາຖະໜາເນືອງ ໆ ເຊິ່ງໄຮ່ນາ ທີ່ດິນ ເງິນ
ງົວ ມ້າ ທາດ ບຸຣຸດ ສະຕີ ພວກພ້ອງ ຫຼື ກາມຈຳນວນຫຼາຍ

[໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ກິເລດທັງຫຼາຍອັນບໍ່ມີກຳລັງຄອບງຳນໍຣະຊົນນັ້ນ
ອັນຕະລາຍທັງຫຼາຍຍ່ຳຍີນໍຣະຊົນນັ້ນ
ຍ້ອນອັນຕະລາຍນັ້ນ ທຸກຈຶ່ງຕິດຕາມນໍຣະຊົນນັ້ນໄປ
ເໝືອນນ້ຳໄຫຼເຂົ້າເຮືອທີ່ຮົ່ວສັນນັ້ນ

ຄຳວ່າ ອັນບໍ່ມີກຳລັງ ໃນຄຳວ່າ ກິເລດທັງຫຼາຍອັນບໍ່ມີກຳລັງຄອບງຳນໍຣະຊົນນັ້ນ ອະທິບາຍວ່າ ກິເລດອັນບໍ່ມີກຳລັງ ຄື ອ່ອນກຳລັງ ມີກຳລັງໜ້ອຍ ມີເຫື່ອແຮງໜ້ອຍ ຊົ່ວ ຊາມ ເສື່ອມ ຕ່ຳ ໜ້າຮັງກຽດ ຫຍາບຊ້າ ເລັກໜ້ອຍ ກິເລດເຫຼົ່ານັ້ນຍ່ອມເຂົ້າຄອບຄອງ ຢຶດຄອງ ຄອບງຳ ຖ້ວມທັບ ຮັດຄຶງ ຍ່ຳຍີບຸກຄົນນັ້ນ ລວມຄວາມວ່າ ກິເລດທັງຫຼາຍອັນບໍ່ມີກຳລັງຄອບງຳນໍຣະຊົນນັ້ນ ແນວນີ້ໄດ້ຄືກັນ

ອີກໄນໜຶ່ງ ສັດທາພະລະ ວິຣິຍະພະລະ ສະຕິພະລະ ສະມາທິພະລະ ປັນຍາພະລະ ຫິຣິພະລະ ໂອດຕັບປະພະລະ ຍ່ອມບໍ່ມີແກ່ບຸກຄົນໃດ ກິເລດເຫຼົ່ານັ້ນຍ່ອມເຂົ້າຄອບຄອງ ຢຶດຄອງ ຄອບງຳ ຖ້ວມທັບ ຮັດຄຶງ ຍ່ຳຍີບຸກຄົນນັ້ນຜູ້ບໍ່ມີກຳລັງ ອ່ອນກຳລັງ ມີກຳລັງໜ້ອຍ ມີເຫື່ອແຮງໜ້ອຍ ຊົ່ວ ຊາມ ເສື່ອມ ຕ່ຳ ໜ້າຮັງກຽດ ຫຍາບຊ້າ ເລັກໜ້ອຍ ລວມຄວາມວ່າ ກິເລດທັງຫຼາຍອັນບໍ່ມີກຳລັງຄອບງຳນໍຣະຊົນນັ້ນ ແນວນີ້ໄດ້ຄືກັນ

## ວ່າດ້ວຍອັນຕະລາຍ ໒ ຢ່າງ

ຄຳວ່າ ອັນຕະລາຍທັງຫຼາຍ ໃນຄຳວ່າ ອັນຕະລາຍທັງຫຼາຍຍ່ຳຍີນໍຣະຊົນນັ້ນ ໄດ້ແກ່ ອັນຕະລາຍ ໒ ຢ່າງ ຄື (໑) ອັນຕະລາຍທີ່ຜາກົດ (໒) ອັນຕະລາຍທີ່ບໍ່ຜາກົດ

ອັນຕະລາຍທີ່ຜາກົດ ຄື ອັນໃດ?

ຄື ຮາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ເສືອດາວ ໝາປ່າ ງົວ ກະບື ຊ້າງ ງູ ແມງ ງອດ ຂີ້ເຂັບ ໂຈນ ຄົນທີ່ໄດ້ກໍ່ກຳໄວ້ ຫຼື ຍັງບໍ່ໄດ້ກໍ່ກຳໄວ້ ໂຣກທາງຕາ ໂຣກທາງຫູ ໂຣກທາງ ດັງ ໂຣກທາງລີ້ນ ໂຣກທາງກາຍ ໂຣກຫົວ ໂຣກຫູ ໂຣກປາກ ໂຣກແຂ້ວ ໂຣກໄອ ໂຣກຫືດ ໄຂ້ຫວັດ ໄຂ້ພິດ ໄຂ້ເຊື່ອມຊຶມ ໂຣກທ້ອງ ເປັນລົມສະຫຼົບ ລົງແດງ ຈຸກສຽດ ອະຫິວາຕະ ກະໂຣກ ໂຣກຂີ້ທູດ ຝີ ກາກ ຫຼອດລົມໂປ່ງພອງ ລົມບ້າໝູ ຫິດເປື່ອຍ ຫິດດ້ານ ຫິດ ຫູດ ໂຣກລະລອກ ໂຣກບິຊ່ານ ໂຣກເບົາຫວານ ໂຣກເຣີມ ໂຣກພຸພອງ ໂຣກຣິດສີດວງທະວານ ຄວາມເຈັບປ່ວຍທີ່ເກີດຈາກບີ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຄວາມເຈັບປ່ວຍທີ່ເກີດ ຈາກ ລົມ ໄຂ້ສັນນິບາດ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ຄວາມເຈັບປ່ວຍທີ່ເກີດຈາກ ການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດ ອຸດຈາຣະ ປວດປັດສາວະ ຄວາມເຈັບປ່ວຍທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະ ສັດເລືອຄານ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ຜາກົດ

ອັນຕະລາຍທີ່ບໍ່ຜາກົດ ຄື ອັນໃດ?

ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ກາມສັນທະນິວອນ (ສິ່ງກັ້ນຈິດບໍ່ ໃຫ້ກ້າວໜ້າ ໃນຄຸນນະທຳ ຄືຄວາມພໍໃຈໃນກາມ) ພະຍາບາດນິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າ ໃນ ຄຸນນະທຳ ຄືຄວາມຄິດປອງຮ້າຍ) ຖີນະມິດທະນິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນນະ ທຳ ຄືຄວາມທໍ້ດທູ່ແລະເຊື່ອງຊຶມ) ອຸດທັດຈະກຸກກຸດຈະນິວອນ(ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນ ນະທຳ ຄືຄວາມຟຸ້ງຊ່ານແລະຮ້ອນໃຈ) ວິຈິກິດສານິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນນະທຳ ຄືຄວາມລັງເລສົງໄສ) ຣາຄະ ໂທສະ ໂມຫະ ໂກທະ (ຄວາມໂກດ) ອຸປະນາຫະ (ຄວາມຜູກ ໂກດ) ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ປະລາສະ (ຄວາມຕີສະເໝີ) ອິດສາ (ຄວາມຣິດສະຫຍາ) ມັດສະຣິຍະ (ຄວາມຂີ້ຖີ່) ມາຍາ (ຄວາມຫຼອກລວງ) ສາເຖີຍຍະ (ຄວາມໂອ້ອວດ) ຖຳພະ (ຄວາມຫົວດື້) ສາຣຳພະ (ຄວາມແຂ່ງດີ) ມານະ (ຄວາມຖືຕົວ) ອະຕິມານະ (ຄວາມດູໝິ່ນ) ມະທະ (ຄວາມມົວເມົາ) ປະມາທະ (ຄວາມຜະໝາດ) ກິເລດທຸກຊະນິດ ທຸດຈະຣິດທຸກທາງ ຄວາມກະວົນກະວາຍທຸກຢ່າງ ຄວາມຮ້ອນຮົນທຸກສະຖານ ຄວາມເດືອດຮ້ອນທຸກປະການອະກຸ ສະລາພິສັງຂານ ທຸກປະເພດ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ບໍ່ຜາກົດ

ຄຳວ່າ ອັນຕະລາຍທັງຫຼາຍ ອະທິບາຍວ່າ ຊື່ວ່າອັນຕະລາຍ ຍ້ອນມີຄວາມໝາຍ ແນວໃດ ຊື່ວ່າອັນຕະລາຍ ຍ້ອນຄອບງຳ ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ຊື່ວ່າ ອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ

ທີ່ຊື່ວ່າອັນຕະລາຍ ຍ້ອນຄອບງຳ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນຍ່ອມເຂົ້າຄອບຄອງ ຢຶດຄອງ ຄອບງຳ ຖ້ວມທັບ ຮັດຄຶງ ຍ່ຳຍີບຸກຄົນນັ້ນ ທີ່ຊື່ວ່າອັນຕະລາຍ ຍ້ອນຄອບງຳ ເປັນແນວນີ້

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມສູນ ເພື່ອຄວາມເສື່ອມໄປແຫ່ງກຸສົນທຳທັງຫຼາຍ ກຸສົນທຳອັນໃດແດ່ ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມສູນ ເພື່ອຄວາມເສື່ອມໄປແຫ່ງກຸສົນທຳເຫຼົ່ານີ້ ຄື ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ຄາດເຄື່ອນ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ (ຕາ ຫູ ດັງ ລີ້ນ ກາຍ ໃຈ) ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ຄວາມໝັ່ນຈະເລີນສະຕິປັດຖານ ໔ ຄວາມໝັ່ນຈະເລີນສຳມັບປະທານ ໔ ຄວາມໝັ່ນຈະເລີນອິດທິບາດ ໔ ຄວາມໝັ່ນຈະເລີນອິນຊີ ໕ ຄວາມໝັ່ນຈະເລີນພະລະ ໕ ຄວາມໝັ່ນຈະເລີນໂພດຊົງ ໗ ຄວາມໝັ່ນຈະເລີນອະຣິຍະມັກມີອົງ ໘ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວນີ້

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວໃດ?

ຄື ບາບອະກຸສົນທຳເຫຼົ່ານີ້ ຍ່ອມເກີດຂຶ້ນໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສ ປຽບເໝືອນສັດທີ່ອາໄສຮູຍ່ອມຢູ່ໃນຮູ ສັດທີ່ອາໄສນ້ຳຍ່ອມຢູ່ໃນນ້ຳ ສັດທີ່ອາໄສປ່າຍ່ອມຢູ່ໃນປ່າ ສັດທີ່ອາໄສຕົ້ນໄມ້ຍ່ອມຢູ່ເທິງຕົ້ນໄມ້ ສັນໃດ ບາບອະກຸສົນທຳເຫຼົ່ານີ້ ຍ່ອມເກີດໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສ ສັນນັ້ນຄືກັນ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້ຄືກັນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ເປັນແນວໃດ? ພິກຂຸທັງຫຼາຍ ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິແຜ່ຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນຕາເຫັນຮູບ ບາບອະກຸສົນທຳທັງຫຼາຍ ຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ ຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມ ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນເຫດນັ້ນ ພຣະອົງຈຶ່ງຕັດຮຽກພິກຂຸນັ້ນວ່າ ຜູ້ຢູ່ກັບກິເລດ ທີ່ຟຸ້ງຂຶ້ນ

ພິກຂຸທັງຫຼາຍ ອີກໄນໜຶ່ງ ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຫູໄດ້ຍິນສຽງ ຯລຯ ຍ້ອນດັງໄດ້ກິ່ນ ຯລຯ ຍ້ອນລີ້ນຊີມ

ຣົດ ໆລໆ ຍ້ອນກາຍໄດ້ຮັບສຳຜັດ ໆລໆ ຍ້ອນໃຈຮູ້ທຳມາຣົມ ບາບອະກຸສົນທຳທັງຫຼາຍ ຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກພິກຂຸ ນັ້ນວ່າ ຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ພິກຂຸທັງຫຼາຍ ຢ່າງນີ້ແລ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນ ອັດຕະພາບ ເປັນແນວນີ້

## ວ່າດ້ວຍທຳ ໓ ປະການ ເປັນມົນທິນພາຍໃນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ທຳ ໓ ປະການເຫຼົ່ານີ້ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ ທຳ ໓ ປະການ ອັນໃດແດ່ ຄື

໑. ໂລພະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະ ຄາດພາຍໃນ ເປັນຂ້າເສິກພາຍໃນ

໒. ໂທສະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໓. ໂມຫະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

ພິກຂຸທັງຫຼາຍ ທຳ ໓ ປະການເຫຼົ່ານີ້ແລ ຊື່ວ່າເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂລພະເຮັດໃຫ້ຈິດກຳເຣີບ ໂລພະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ)ບໍ່ຮູ້ຈັກໄພນັ້ນ
ຄົນໂລບບໍ່ຮູ້ຈັກຜົນ ຄົນໂລບບໍ່ຮູ້ຈັກເຫດ
ຄວາມໂລບຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ໂທສະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂທສະເຮັດໃຫ້ຈິດກຳເຣີບ ໂທສະເປັນໄພທີ່ເກີດພາຍໃນ

ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂກດບໍ່ຮູ້ຈັກຜົນ ຄົນໂກດບໍ່ຮູ້ຈັກເຫດ
ຄວາມໂກດຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ໂມຫະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂມຫະເຮັດໃຫ້ຈິດກຳເຣີບ ໂມຫະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນຫຼົງບໍ່ຮູ້ຈັກຜົນ ຄົນຫຼົງບໍ່ຮູ້ຈັກເຫດ
ຄວາມຫຼົງຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ

ທີ່ຊື່ວ່າ ອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວນີ້ຄືກັນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ມະຫາບໍພິດ ທຳ ໓ ປະການ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ທຳ ໓ ປະການ ອັນໃດແດ່ ຄື

໑. ໂລພະທຳ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ
໒. ໂທສະທຳ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ
໓. ໂມຫະທຳເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ມະຫາບໍພິດ ທຳ ໓ ປະການເຫຼົ່ານີ້ແລ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະ ໂທສະ ແລະໂມຫະ ເກີດຂຶ້ນໃນຕົນ
ຍ່ອມທຳຮ້າຍບຸຣຸດຜູ້ມີຈິດຊົ່ວຊາມ
ເໝືອນຂີໄຜ່ກຳຈັດຕົ້ນໄຜ່ ສັນນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບເປັນແນວນີ້ຄືກັນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ວ່າ

ຣາຄະ ແລະໂທສະ ມີອັດຕະພາບນີ້ເປັນຕົ້ນເຫດ
ຄວາມບໍ່ຍິນດີກຸສົນທຳ
ຄວາມຍິນດີການມະຄຸນເຊິ່ງເຮັດໃຫ້ຂົນລຸກ ເກີດຈາກອັດຕະພາບນີ້
ບາບວິຕົກ ໃນໃຈ ເກີດຂຶ້ນຈາກອັດຕະພາບນີ້
ຍ່ອມຜູກໃຈຄົນໄວ້ ເໝືອນພວກເດັກຜູກຕີນກາໄວ້ແນວນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວນີ້ຄືກັນ

ຄຳວ່າ ອັນຕະລາຍທັງຫຼາຍຍ່ຳຍີນໍຣະຊົນນັ້ນ ໄດ້ແກ່ ອັນຕະລາຍເຫຼົ່ານັ້ນຍ່ອມເຂົ້າ ຄອບຄອງ ຍຶດຄອງ ຄອບງຳ ຖ້ວມທັບ ຮັດຄຶງ ຍ່ຳຍີບຸກຄົນນັ້ນ ລວມຄວາມວ່າ ອັນຕະລາຍ ທັງຫຼາຍຍ່ຳຍີນໍຣະຊົນນັ້ນ

ຄຳວ່າ ນັ້ນ ໃນຄຳວ່າ ຍ້ອນອັນຕະລາຍນັ້ນ ທຸກຈຶ່ງຕິດຕາມນໍຣະຊົນນັ້ນໄປ ອະທິບາຍວ່າ ຍ້ອນອັນຕະລາຍນັ້ນ ໆ ທຸກຈຶ່ງຕິດຕາມ ໄປຕາມ ໄລ່ຕາມບຸກຄົນນັ້ນ ຄື ຊາດທຸກ ຈຶ່ງຕິດຕາມ ໄປຕາມ ໄລ່ຕາມ ຊະຣາທຸກ ฯລฯ ພະຍາທິທຸກ ฯລฯ ມໍຣະນະທຸກ ฯລฯ ທຸກຄືຄວາມເສົ້າໂສກ ຄວາມຮ່ຳໄຮ ຄວາມທຸກກາຍ ຄວາມທຸກໃຈ ຄວາມຄັບແຄ້ນໃຈ ฯລฯ ທຸກເນື່ອງຈາກການເກີດໃນນະຮົກ ฯລฯ ທຸກເນື່ອງຈາກການເກີດໃນກຳເນີດເດຍຣັດສານ ฯລฯ ທຸກເນື່ອງຈາກການເກີດໃນເຜດວິໄສ ฯລฯ ທຸກເນື່ອງຈາກການເກີດໃນໂລກມະນຸດ ฯລฯ ທຸກເນື່ອງຈາກການຖືກຳເນີດໃນທ້ອງ ฯລฯ ທຸກເນື່ອງຈາກການຢູ່ໃນທ້ອງ ฯລฯ ທຸກເນື່ອງຈາກການເກີດຈາກທ້ອງ ฯລฯ ທຸກທີ່ສືບເນື່ອງມາຈາກຜູ້ເກີດ ฯລฯ ທຸກຂອງຜູ້ເກີດທີ່ເນື່ອງມາຈາກຜູ້ອື່ນ ฯລฯ ທຸກທີ່ເກີດຈາກຄວາມພະຍາຍາມຂອງຕົນເອງ ฯລฯ ທຸກທີ່ເກີດຈາກຄວາມພະຍາຍາມຂອງຜູ້ອື່ນ ฯລฯ ຄວາມທຸກກາຍ ທຸກໃຈ ฯລฯ ທຸກທີ່ເກີດຈາກສັງຂານ ฯລฯ ທຸກທີ່ເກີດຈາກຄວາມຜັນປ່ຽນ ฯລฯ ໂຣກທາງຕາ ໂຣກທາງຫູ ໂຣກທາງດັງ ໂຣກທາງລີ້ນ ໂຣກທາງກາຍ ໂຣກຫົວ ໂຣກຫູ ໂຣກປາກ ໂຣກແຂ້ວ ໂຣກໄອ ໂຣກຫືດ ໄຂ້ຫວັດ ໄຂ້ພິດ ໄຂ້ເຊື່ອມຊຶມ ໂຣກທ້ອງ ເປັນລົມສະຫຼົບ ລົງແດງ ຈຸກສຽດ ອະຫິວາຕະກະໂຣກ ໂຣກເຮື້ອນ ຝີ ກາກ ຫຼອດລົມໂປ່ງພອງ ລົມບ້າໝູ ຫິດເປື່ອຍ ຫິດດ້ານ ຫິດ ຫູດ ໂຣກລະລອກ ໂຣກະບີຊ່ານ ໂຣກເບົາຫວານ ໂຣກເຣີມ ໂຣກພຸພອງ ໂຣກຣິດສີດວງທະວານ ຄວາມເຈັບປ່ວຍທີ່ເກີດຈາກບີ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຄວາມເຈັບປ່ວຍທີ່ເກີດຈາກລົມ ໄຂ້ສັນນິບາດ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດອຸດຈາຣະ ປວດປັດສາວະ ທຸກທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ທຸກຍ້ອນມານດາຕາຍ ທຸກຍ້ອນບິດາຕາຍ ທຸກ

ຍ້ອນອ້າຍນ້ອງຊາຍຕາຍ ທຸກຍ້ອນ ເອື້ອຍນ້ອງສາວຕາຍ ທຸກຍ້ອນບຸດຕາຍ ທຸກຍ້ອນທິດາຕາຍ ທຸກຍ້ອນຄວາມພິນາດຂອງຍາດ ທຸກຍ້ອນໂພຄະຊັບພິນາດ ທຸກຍ້ອນຄວາມເສຍຫາຍທີ່ເກີດຈາກ ໂຣກ ທຸກຍ້ອນສີນວິບັດ ທຸກຍ້ອນທິດຖິວິບັດຈຶ່ງຕິດຕາມ ໄປຕາມ ໄລ່ຕາມບຸກຄົນນັ້ນ ລວມ ຄວາມວ່າ ຍ້ອນອັນຕະລາຍນັ້ນ ທຸກຈຶ່ງຕິດຕາມນໍຣະຊົນນັ້ນໄປ

ຄຳວ່າ ເໝືອນນ້ຳໄຫຼເຂົ້າເຮືອຮົ່ວ ອະທິບາຍວ່າ ປຽບເໝືອນນ້ຳໄຫຼເຂົ້າເຮືອຮົ່ວ ຄື ນ້ຳ ໄຫຼເຂົ້າ ພຸ່ງເຂົ້າ ທະລັກເຂົ້າຕາມຮອຍຮົ່ວນັ້ນ ໆ ໄດ້ແກ່ ນ້ຳໄຫຼເຂົ້າ ພຸ່ງເຂົ້າ ທະລັກເຂົ້າ ດ້ານ ຫົວເຮືອແດ່ ດ້ານທ້າຍເຮືອແດ່ ດ້ານທ້ອງເຮືອແດ່ ດ້ານຂ້າງເຮືອແດ່ ສັນໃດ ຍ້ອນອັນຕະລາຍ ນັ້ນ ໆ ທຸກຈຶ່ງຕິດຕາມ ໄປຕາມ ໄລ່ຕາມບຸກຄົນນັ້ນ ຄື ຊາດທຸກ ໗ລ໗ ທຸກຍ້ອນທິດຖິວິບັດຈຶ່ງ ຕິດຕາມ ໄປຕາມ ໄລ່ຕາມບຸກຄົນນັ້ນ ຄືກັນສັນນັ້ນ ລວມຄວາມວ່າ ເໝືອນນ້ຳໄຫຼເຂົ້າເຮືອຮົ່ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ກິເລດທັງຫຼາຍອັນບໍ່ມີກຳລັງຄອບງຳນໍຣະຊົນນັ້ນ
ອັນຕະລາຍທັງຫຼາຍຍ່ຳຍີນໍຣະຊົນນັ້ນ
ຍ້ອນອັນຕະລາຍນັ້ນ ທຸກຈຶ່ງຕິດຕາມນໍຣະຊົນນັ້ນໄປ
ເໝືອນນ້ຳໄຫຼເຂົ້າເຮືອຮົ່ວ ສັນນັ້ນ

[໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍ້ອນເຫດນັ້ນ ສັດເກີດເພິ່ງມີສະຕິທຸກເມື່ອ ລະກາມທັງຫຼາຍໄດ້
ເມື່ອລະກາມເຫຼົ່ານັ້ນໄດ້ແລ້ວ ເພິ່ງຂ້າມໂອຄະໄດ້
ເໝືອນຄົນວິດນ້ຳເຮືອແລ້ວໄປເຖິງຝັ່ງໄດ້ ສັນນັ້ນ

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ສັດເກີດເພິ່ງມີສະຕິທຸກເມື່ອ ໄດ້ແກ່ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ສັດເກີດເມື່ອ ເຫັນໂທດນັ້ນໃນກາມທັງຫຼາຍ ລວມຄວາມວ່າ ຍ້ອນເຫດນັ້ນ

ຄຳວ່າ ສັດເກີດ ໄດ້ແກ່ ສັດ ຄື ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດ ເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ທຸກເມື່ອ ອະທິບາຍວ່າ ທຸກເມື່ອ ຄື ໃນການທັງປວງ ຕະຫຼອດການທັງປວງ ຕະຫຼອດການເປັນນິດ ຕະຫຼອດການຍັ່ງຍືນ ຕະຫຼອດການຕໍ່ເນື່ອງກັນ ຕະຫຼອດການສືບເນື່ອງ ກັນ ຕະຫຼອດການຕິດຕໍ່ກັນ ຕະຫຼອດການເປັນລຳດັບ ຕະຫຼອດການຕິດຕໍ່ກັນເໝືອນຣະລອກຄື້ນ ຕະຫຼອດການເປັນໄປຕໍ່ເນື່ອງບໍ່ຂາດສາຍ ຕະຫຼອດການສືບຕໍ່ກັນກະຊັ້ນຊິດ ຕະຫຼອດການ ກ່ອນ ພັດ ຫຼັງພັດ ຕະຫຼອດປະຖົມຍາມ ມັດຊິມະຍາມ ປັດສິມະຍາມ ຕະຫຼອດຂ້າງແຮມ ຂ້າງຂຶ້ນ ຕະ ຫຼອດລະດູຝົນ ລະດູໜາວ ລະດູຮ້ອນ ຕະຫຼອດປະຖົມໄວ ມັດຊິມະໄວ ປັດສິມະໄວ

# ວ່າດ້ວຍຜູ້ມີສະຕິທຸກເມື່ອ

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
໒. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
໓. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
໔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ

ຊື່ວ່າມີສະຕິດ້ວຍເຫດອີກ ໔ ຢ່າງ ຯລຯ ສັດເກີດນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ມີສະຕິ ລວມຄວາມວ່າ ຍ້ອນເຫດນັ້ນ ສັດເກີດເພິ່ງມີສະຕິທຸກເມື່ອ

ຄຳວ່າ ລະກາມທັງຫຼາຍໄດ້ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ລະກາມທັງຫຼາຍໄດ້ ອະທິບາຍວ່າ ເພິ່ງລະກາມໄດ້ໂດຍເຫດ ໒ ຢ່າງ ຄື (໑) ໂດຍການຂົ່ມໄວ້ (໒) ໂດຍການຕັດຂາດ

ບຸກຄົນເພິ່ງລະກາມໄດ້ໂດຍການຂົ່ມໄວ້ ເປັນແນວໃດ?

ຄື ບຸກຄົນເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຮ່າງໂຄງກະດູກ ຍ້ອນໃຫ້ຄວາມຍິນດີເລັກໜ້ອຍ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນຕ່ອນຊີ້ນ ຍ້ອນເປັນຂອງທົ່ວໄປແກ່ຄົນສ່ວນຫຼາຍ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້

ເມື່ອພິຈາລະນາເຫັນວ່າ ກາມທັງຫຼາຍປຽບເໝືອນທອນໄຟຫຍ້າ ຍ້ອນໄໝ້ ລຸກລາມ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້ ຯລຯ ບຸກຄົນກຳລັງຈະເລີນເນວະສັນຍານາສັນຍາຍະຕະນະ ສະມາບັດ ຈຶ່ງລະກາມໄດ້ໂດຍການຂົ່ມໄວ້ ບຸກຄົນຊື່ວ່າເພິ່ງລະກາມໄດ້ໂດຍການຂົ່ມໄວ້ ເປັນແນວນີ້ ຯລຯ ບຸກຄົນຊື່ວ່າເພິ່ງລະກາມໄດ້ໂດຍການຕັດຂາດ ເປັນແນວນີ້ ລວມຄວາມວ່າ ລະກາມທັງຫຼາຍໄດ້

ຄຳວ່າ ເຫຼົ່ານັ້ນ ໃນຄຳວ່າ ເມື່ອລະກາມເຫຼົ່ານັ້ນໄດ້ແລ້ວ ເພິ່ງຂ້າມໂອຄະໄດ້ ອະທິບາຍວ່າ ສັດເກີດກຳນົດຮູ້ວັດຖຸກາມແລ້ວ ລະ ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດກາມ ລະ ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມ ບໍ່ມີອີກເຊິ່ງກາມສັນທະນິວອນ ລະ ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງພະຍາບາດນິວອນ ຯລຯ ຖີນະມິດທະນິວອນ ຯລຯ ອຸດທັດຈະກຸກກຸດຈະນິວອນ ຯລຯ ວິຈິກິດສານິວອນ ເພິ່ງຂ້າມ ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍກາໂມຄະ (ຫ້ວງນ້ຳຄືກາມ) ພະໂວຄະ (ຫ້ວງ

ນ້ຳຄືພົບ) ທິດໂຖຄະ (ຫ້ວງນ້ຳຄືທິດຖິ) ອະວິດໄຊຄະ (ຫ້ວງນ້ຳຄືອະວິດຊາ)ໄດ້ ລວມຄວາມວ່າ ເມື່ອລະການເຫຼົ່ານັ້ນໄດ້ແລ້ວ ເພິ່ງຂ້າມໂອຄະໄດ້

ຄຳວ່າ ເໝືອນຄົນວິດນ້ຳອອກຈາກເຮືອແລ້ວໄປເຖິງຝັ່ງໄດ້ ສະນັ້ນ ອະທິບາຍວ່າ ປຽບເໝືອນ ບຸກຄົນວິດ ຕັກ ຖິ້ມນ້ຳໃນເຮືອທີ່ເຮັດໃຫ້ເຮືອ ບັນທຸກໜັກ ແລ້ວເພິ່ງໄປເຖິງຝັ່ງໄດ້ໄວ ດ້ວຍເຮືອທີ່ເບົາ ໂດຍບໍ່ຍາກຫຼາຍ ສັນໃດ ສັດເກີດກຳນົດຮູ້ວັດຖຸການແລ້ວ ລະ ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດການ ລະ ລະເວັ້ນ ບັນເທົາ ເຮັດໃຫ້ໝົດ ສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການສັນທະນິວອນ ຯລຯ ພະຍາບາດນິວອນ ຯລຯ ຖີນະມິດທະນິວອນ ຯລຯ ອຸດທັດຈະກຸກກຸດຈະນິວອນ ຯລຯ ວິຈິກິດສານິວອນ ກໍຈະເພິ່ງໄປເຖິງຝັ່ງໄດ້ໄວ ໂດຍບໍ່ຍາກຫຼາຍ ສັນນັ້ນຄືກັນ ອະມະຕະນິບພານ ຕັດຮຽກວ່າ ຝັ່ງ ຄື ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ

ຄຳວ່າ ເພິ່ງໄປເຖິງຝັ່ງ ໄດ້ແກ່ ເພິ່ງເຖິງຝັ່ງ ເພິ່ງຖືກຕ້ອງຝັ່ງ ເພິ່ງເຮັດໃຫ້ແຈ້ງຝັ່ງໄດ້

ຄຳວ່າ ເຖິງຝັ່ງໄດ້ ອະທິບາຍວ່າ ຜູ້ໃດປະສົງຈະໄປສູ່ຝັ່ງ ຜູ້ນັ້ນກໍຊື່ວ່າ ຜູ້ເຖິງຝັ່ງໄດ້ ຜູ້ໃດກຳລັງໄປສູ່ຝັ່ງ ຜູ້ນັ້ນກໍຊື່ວ່າ ຜູ້ເຖິງຝັ່ງໄດ້ ຜູ້ໃດໄປເຖິງຝັ່ງແລ້ວ ຜູ້ນັ້ນກໍຊື່ວ່າ ຜູ້ເຖິງຝັ່ງໄດ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ຄຳວ່າ ພາມ ຜູ້ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວ ຢືນຢູ່ເທິງບົກ ນີ້ເປັນຊື່ຂອງພຣະອະຣະຫັນ ພຣະອະຣະຫັນນັ້ນເຖິງຝັ່ງໄດ້ ດ້ວຍຄວາມຮູ້ຍິ່ງ ເຖິງຝັ່ງໄດ້ດ້ວຍການກຳນົດຮູ້ ເຖິງຝັ່ງໄດ້ດ້ວຍການລະ ເຖິງຝັ່ງໄດ້ດ້ວຍການຈະເລີນພາວະນາ ເຖິງຝັ່ງໄດ້ດ້ວຍການເຮັດໃຫ້ແຈ້ງ ເຖິງຝັ່ງໄດ້ດ້ວຍການເຂົ້າສະມາບັດ ເຖິງຝັ່ງໄດ້ດ້ວຍຄວາມຮູ້ຍິ່ງທຳທັງປວງ ເຖິງຝັ່ງໄດ້ດ້ວຍການກຳນົດຮູ້ທຸກທັງປວງ ເຖິງຝັ່ງໄດ້ດ້ວຍການລະກິເລດທັງປວງ ເຖິງຝັ່ງໄດ້ດ້ວຍການຈະເລີນອະຣິຍະມັກ ໔ ເຖິງຝັ່ງໄດ້ດ້ວຍການເຮັດໃຫ້ແຈ້ງນິໂຣດ ເຖິງຝັ່ງໄດ້ດ້ວຍການເຂົ້າສະມາບັດ ໘

ພຣະອະຣະຫັນນັ້ນເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະສິນ ເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະສະມາທິ ເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະປັນຍາ ເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະວິມຸດຕິ

ພຣະອະຣະຫັນນັ້ນເຖິງຝັ່ງ ບັນລຸຝັ່ງ ເຖິງສ່ວນສຸດ ບັນລຸສ່ວນສຸດ ເຖິງປາຍສຸດ ບັນລຸປາຍສຸດ ເຖິງທ້າຍສຸດ ບັນລຸທ້າຍສຸດ ເຖິງຄວາມສຳເລັດ ບັນລຸຄວາມສຳເລັດ ເຖິງທີ່ປົກປ້ອງ ບັນລຸທີ່ປົກປ້ອງ ເຖິງບ່ອນຫຼົບຫຼີກ ບັນລຸບ່ອນຫຼົບຫຼີກ ເຖິງທີ່ເພິ່ງ ບັນລຸທີ່ເພິ່ງ ເຖິງທີ່ບໍ່ມີໄພ ບັນລຸທີ່ບໍ່ມີໄພ ເຖິງທີ່ບໍ່ຈຸຕິ ບັນລຸທີ່ບໍ່ຈຸຕິ ເຖິງທີ່ບໍ່ຕາຍ ບັນລຸທີ່ບໍ່ຕາຍ ເຖິງທີ່ດັບ ບັນລຸທີ່ດັບ

ພຣະອະຣະຫັນນັ້ນຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ຜ່ານທາງ ໄກ ໄດ້ແລ້ວ ເຖິງທິດ (ນິບພານ) ແລ້ວ ເຖິງຈຸດຈົບ (ນິບພານ) ແລ້ວ ຮັກສາພົມມະຈັນໄດ້ແລ້ວ ເຖິງທິດຖີອັນສູງສຸດ໋ແລ້ວ ຈະເລີນມັກໄດ້ແລ້ວ ລະກິເລດໄດ້ແລ້ວ ຮູ້ແຈ້ງທຳທີ່ບໍ່ກຳເຮີບແລ້ວ ເຮັດ ນິໂຣດໃຫ້ແຈ້ງໄດ້ແລ້ວ ທ່ານກຳນົດຮູ້ທຸກໄດ້ແລ້ວ ລະສະມຸໄທໄດ້ແລ້ວ ຈະເລີນມັກໄດ້ແລ້ວ ເຮັດນິ ໂຣດໃຫ້ແຈ້ງແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງແລ້ວ ກຳນົດຮູ້ທຳທີ່ຄວນກຳນົດຮູ້ໄດ້ແລ້ວ ລະທຳທີ່ຄວນ ລະໄດ້ແລ້ວ ຈະເລີນທຳທີ່ຄວນຈະເລີນໄດ້ແລ້ວ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງໄດ້ແລ້ວ

ພຣະອະຣະຫັນນັ້ນຖອນຫຼັ້ມສະລັກ ຄື ອະວິດຊາໄດ້ແລ້ວ ຖົມຄູຄືກຳໄດ້ແລ້ວ ຖອນເສົາ ຣະນຽດ ຄື ຕັນຫາໄດ້ແລ້ວ ບໍ່ມີບານປະຕູ ຄື ສັງໂຍດ ເປັນຜູ້ໄກຈາກຂ້າເສິກ ຄື ກິເລດ ປົດ ທຸງ ຄື ມານະລົງສາແລ້ວ ປົງພາຣະໄດ້ແລ້ວ ບໍ່ກ່ຽວຂ້ອງກັບໂຍຄະກິເລດແລ້ວ ລະອົງ ໕ (ແຫ່ງນິວອນ) ໄດ້ແລ້ວ ປະກອບດ້ວຍອົງ ໖ ມີທຳເຄື່ອງຮັກສາຢ່າງເອກ (ຄືສະຕິ) ມີ ອະປັດ ເສນະທຳ ໔ ຢ່າງ ມີປັດເຈກສັດຈະ ອັນບັນເທົາໄດ້ແລ້ວ ມີການສະແຫວງຫາອັນສະລະໄດ້ໂດຍ ຊອບ ບໍ່ບົກຜ່ອງ ມີຄວາມດຳຣິບໍ່ຂຸ່ນມົວ ມີກາຍສັງຂານອັນຣະງັບໄດ້ແລ້ວ ມີຈິດຫຼຸດພົ້ນດີແລ້ວ ມີປັນຍາຫຼຸດພົ້ນໄດ້ດີ ເປັນຜູ້ບໍລິສຸດບໍລິບູນ ຢູ່ຈົບພົມມະຈັນ ເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ເຖິງການບັນລຸປະຣະມັດຖະທຳແລ້ວ ພຣະອະຣະຫັນນັ້ນ ບໍ່ຕ້ອງກໍ່ຜົນກຳ ບໍ່ຕ້ອງກຳຈັດ ກຳຈັດ ໄດ້ແລ້ວດຳຣົງຕົນຢູ່ ບໍ່ຕ້ອງລະກິເລດ ບໍ່ຕ້ອງຖືໝັ້ນ ລະໄດ້ແລ້ວດຳຣົງ ຕົນຢູ່ ບໍ່ຕ້ອງຈັບ (ດ້ວຍ ຕັນຫາ) ບໍ່ຕ້ອງຍົກ (ຕົນດ້ວຍມານະ) ຫຍັບຮຽບຮ້ອຍແລ້ວດຳຣົງຕົນຢູ່ບໍ່ຕ້ອງດັບ (ໄຟຄືກິເລດ) ບໍ່ຕ້ອງກໍ່ ດັບໄດ້ແລ້ວດຳຣົງຕົນຢູ່ ຊື່ວ່າດຳຣົງຕົນຢູ່ໄດ້ ຍ້ອນ ປະ ກອບດ້ວຍສີນຂັນອັນເປັນອະ ເສຂະ ຯລຯ ດ້ວຍສະມາທິຂັນ ຯລຯ ດ້ວຍປັນຍາຂັນ ຯລຯ ດ້ວຍວິມຸດຕິຂັນ ຯລຯ ດຳຣົງຕົນ ຢູ່ດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ ດຳຣົງຕົນຢູ່ ແທງຕະຫຼອດສັດຈະແລ້ວ ດຳ ຣົງຕົນຢູ່ໂດຍການກ້າວລ່ວງຕັນຫາອັນເປັນເຫດໃຫ້ຫວັ່ນໄຫວ ດຳຣົງຕົນ ຢູ່ໂດຍການດັບໄຟ ຄື ກິເລດ ດຳຣົງຕົນຢູ່ໂດຍບໍ່ຕ້ອງວຽນວ່າຍຕາຍເກີດ ດຳຣົງຕົນຢູ່ໂດຍ ການສະມາທານທຳຂັ້ນສຸດ ຍອດ ດຳຣົງຕົນຢູ່ໂດຍການເສບວິມຸດຕິ ດຳຣົງຕົນຢູ່ດ້ວຍເມດຕາອັນບໍລິສຸດ ຯລຯ ດ້ວຍ ກະລຸນາ ຯລຯ ດ້ວຍມຸທິຕາອັນບໍລິສຸດ ຯລຯ ດຳຣົງຕົນຢູ່ດ້ວຍອຸເປກຂາ ອັນບໍລິສຸດ ດຳຣົງຕົນ ຢູ່ດ້ວຍຄວາມບໍລິສຸດຢ່າງຍິ່ງ ດຳຣົງຕົນຢູ່ດ້ວຍຄວາມບໍລິສຸດຍ້ອນບໍ່ມີຕັນຫາທິດຖິແລະມານະ ດຳ ຣົງຕົນຢູ່ໂດຍຄວາມເປັນຜູ້ຫຼຸດພົ້ນ ດຳຣົງຕົນຢູ່ໂດຍຄວາມເປັນຜູ້ສັນໂດດ ດຳຣົງຕົນຢູ່ໃນຂັນສຸດ ທ້າຍ ດຳຣົງຕົນຢູ່ໃນທາດສຸດທ້າຍ ດຳຣົງຕົນຢູ່ໃນອາຍະຕະນະສຸດທ້າຍ ດຳຣົງຕົນຢູ່ໃນຄະຕິ ສຸດທ້າຍ ດຳຣົງຕົນຢູ່ໃນການຖືກຳເນີດສຸດທ້າຍ ດຳຣົງຕົນຢູ່ໃນປະຕິສົນທິສຸດທ້າຍ ດຳຣົງຕົນຢູ່ ໃນພົບສຸດທ້າຍ ດຳຣົງຕົນຢູ່ໃນສົງສານ ສຸດທ້າຍ ດຳຣົງຕົນຢູ່ໃນວັດຕະສຸດທ້າຍ ດຳຣົງຕົນຢູ່ໃນ ພົບສຸດທ້າຍ ດຳຣົງຕົນຢູ່ໃນປະຊຸມແຫ່ງຂັນຂັ້ນສຸດທ້າຍ ຊົງໄວ້ເຊິ່ງຮ່າງກາຍຂັ້ນສຸດທ້າຍ ເປັນຜູ້ ໄກຈາກຂ້າເສິກ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ພຣະຂີນາສົບນັ້ນ ມີພົບນີ້ເປັນພົບສຸດທ້າຍ
ມີປະຊຸມແຫ່ງຂັນນີ້ເປັນຄັ້ງສຸດທ້າຍ
ບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ

ລວມຄວາມວ່າ ເໝືອນຄົນວິດນ້ຳອອກຈາກເຮືອແລ້ວໄປເຖິງຝັ່ງໄດ້ ສະນັ້ນ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຍ້ອນເຫດນັ້ນ ສັດເກີດເພິ່ງມີສະຕິທຸກເມື່ອ ລະການທັງຫຼາຍໄດ້ ເມື່ອລະການເຫຼົ່ານັ້ນໄດ້ແລ້ວ ເພິ່ງຂ້າມໂອຄະໄດ້ ເໝືອນຄົນວິດນ້ຳອອກຈາກເຮືອແລ້ວໄປເຖິງຝັ່ງໄດ້ ສັນນັ້ນ

**ການະສຸດຕະນິດເທດທີ ໑ ຈົບ**

# ໔. ຄຸຫັດຖະກະສຸດຕະນິດເທດ

## ອະທິບາຍຄຸຫັດຖະກະສູດ

## ວ່າດ້ວຍນໍຣະຊົນຜູ້ຂ້ອງຢູ່ໃນຖ້ຳຄືກາຍ

ພຣະສາຣີບຸດເຖຣະຈະກ່າວອະທິບາຍຄຸຫັດຖະກະສູດ ດັ່ງຕໍ່ໄປນີ້

[໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນໍຣະຊົນຜູ້ຂ້ອງຢູ່ໃນຖ້ຳ ຖືກກິເລດຈຳນວນຫຼາຍປົດບັງໄວ້
ເມື່ອດຳຣົງຕົນຢູ່ (ຢ່າງນີ້) ກໍຈົມລົງໃນເຫດໃຫ້ລຸ້ມຫຼົງ
ຜູ້ເປັນເຊັ່ນນັ້ນແລ ຍ່ອມຢູ່ໄກຈາກວິເວກ
ຍ້ອນການທັງຫຼາຍໃນໂລກບໍ່ເປັນຂອງທີ່ນໍຣະຊົນຈະລະໄດ້ງ່າຍເລີຍ

ຄຳວ່າ ຜູ້ຂ້ອງຢູ່ ໃນຄຳວ່າ ຜູ້ຂ້ອງຢູ່ໃນຖ້ຳ ຖືກກິເລດຈຳນວນຫຼາຍປົດບັງໄວ້ ກ່າວໄວ້ແລ້ວຂ້າງຕົ້ນ ອັນໜຶ່ງ ຄຳວ່າ ຖ້ຳ ຄວນກ່າວເຖິງກ່ອນ ກາຍ ຕັດຮຽກວ່າ ຖ້ຳ

ຄຳວ່າ ກາຍ ຖ້ຳ ຮ່າງກາຍ ຮ່າງກາຍຕົນ ເຮືອ ລົດ ທຸງ ຈອມປວກ ຮັງ ນະຄອນ ຕູບ ຝີ ໝໍ້ ຫຼືນາກ ນີ້ເປັນຊື່ຂອງກາຍ

ຄຳວ່າ ຜູ້ຂ້ອງຢູ່ໃນຖ້ຳ ໄດ້ແກ່ ຜູ້ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວພັນ ຢູ່ໃນຖ້ຳ ອະທິບາຍວ່າ ນໍຣະຊົນ ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວພັນຢູ່ໃນຖ້ຳເໝືອນສິ່ງຂອງທີ່ຂ້ອງ ຕິດ ກ່ຽວ ແຂວນ ກ່ຽວພັນ ຕິດຕຶງຢູ່ທີ່ຕະປູຂ້າງຝາ ຫຼື ທີ່ໄມ້ແຂວນ ສັນນັ້ນ

ສົມຈິງ ດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ຣາທະ ຜູ້ຂ້ອງຕິດຢູ່ໃນຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍ ແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນ ຖືໝັ້ນ ນອນເນື່ອງໃນຮູບ ຍ້ອນເຫດນັ້ນ ເຮົາຈິ່ງຮຽກວ່າ ຜູ້ຂ້ອງ ຯລຯ ຣາທະ ຜູ້ຂ້ອງຕິດຢູ່ ໃນຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນ ຖືໝັ້ນ ນອນເນື່ອງໃນເວທະນາ ຯລຯ ໃນສັນຍາ ຯລຯໃນສັງຂານ ຯລຯ ໃນວິນຍານ ຍ້ອນເຫດນັ້ນ ເຮົາຈິ່ງຮຽກວ່າ ຜູ້ຂ້ອງ ຄຳວ່າ ຜູ້ຂ້ອງ ເປັນຊື່ຂອງຄວາມກ່ຽວຂ້ອງ ລວມຄວາມວ່າ ຜູ້ຂ້ອງຢູ່ໃນຖ້ຳ

ຄຳວ່າ ຖືກກິເລດຈຳນວນຫຼາຍປິດບັງໄວ້ ອະທິບາຍວ່າ ຖືກກິເລດເປັນຈຳນວນຫຼາຍປິດບັງໄວ້ ຄື ຖືກຣາຄະປິດບັງໄວ້ ຖືກໂທສະປິດບັງໄວ້ ຖືກໂມຫະປິດບັງໄວ້ ຖືກໂກທະປິດບັງໄວ້ ຖືກ ອຸປະນາຫະປິດບັງໄວ້ ຖືກມັກຂະປິດບັງໄວ້ ຖືກປະລາສະປິດບັງໄວ້ ຖືກອິດສາປິດບັງໄວ້ ຖືກ ມັດສະຣິຍະປິດບັງໄວ້ ຖືກມາຍາປິດບັງໄວ້ ຖືກສາເຖີຍຍະປິດບັງໄວ້ ຖືກຖຳພະປິດບັງໄວ້ ຖືກສາຣຳພະປິດບັງໄວ້ ຖືກມານະປິດບັງໄວ້ ຖືກອະຕິມານະປິດບັງໄວ້ ຖືກມະທະປິດບັງໄວ້ ຖືກປະມາທະປິດບັງໄວ້ ໄດ້ແກ່ ຖືກກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯຄວາມກະວົນກະວາຍ ທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານ ທຸກປະເພດ ປິດບັງ ປົກປິດ ປິດລ້ອມ ຫຸ້ມຫໍ່ ໂອບລ້ອມ ຫ້ອມລ້ອມ ຄອບຄຸມ ປົກຄຸມ ບົດບັງໄວ້ ລວມຄວາມວ່າ ຜູ້ຂ້ອງຢູ່ໃນຖ້ຳ ຖືກກິເລດຈຳນວນຫຼາຍປິດບັງໄວ້

ຄຳວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ ໃນຄຳວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ກໍຈົມລົງໃນເຫດໃຫ້ລຸ້ມຫຼົງ ອະທິບາຍວ່າ ນໍຣະຊົນເມື່ອດຳຣົງຕົນຢູ່ ຄື ຜູ້ກຳໜັດກໍດຳຣົງຕົນຢູ່ຕາມອຳນາດຣາຄະ ຜູ້ຂັດເຄືອງກໍດຳຣົງຕົນຢູ່ຕາມອຳນາດໂທສະ ຜູ້ຫຼົງກໍດຳຣົງຕົນຢູ່ຕາມອຳນາດໂມຫະ ຜູ້ຍຶດຕິດກໍດຳຣົງຕົນຢູ່ຕາມອຳນາດມານະ ຜູ້ຍຶດຖືກໍດຳຣົງຕົນຢູ່ຕາມອຳນາດທິດຖິ ຜູ້ຟຸ້ງຊ່ານກໍດຳຣົງຕົນຢູ່ຕາມອຳນາດອຸດທັດຈະ (ຄວາມຟຸ້ງຊ່ານ) ຜູ້ລັງເລກໍດຳຣົງຕົນຢູ່ຕາມອຳນາດວິຈິກິດສາ (ຄວາມລັງເລສົງໄສ) ຜູ້ຕົກຢູ່ໃນກຳລັງກິເລດກໍດຳຣົງຕົນຢູ່ຕາມອຳນາດອະນຸໄສ (ກິເລດທີ່ນອນເນື່ອງ) ລວມຄວາມວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ ຍ່ອມເປັນແນວນີ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ຮູບທີ່ຮູ້ໄດ້ທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ກໍມີຢູ່ ຖ້າພິກຂຸ ເພີດເພີນ ເຊີຍຊົມ ຍຶດຕິດຮູບນັ້ນຢູ່ ພິກຂຸທັງຫຼາຍ ສຽງທີ່ຮູ້ໄດ້ທາງຫູ ຯລຯ ມີຢູ່ ຯລຯ ກິ່ນທີ່ຮູ້ໄດ້ທາງດັງ ຯລຯ ມີຢູ່ ຯລຯ ຣົດທີ່ຮູ້ໄດ້ທາງລີ້ນ ຯລຯ ມີຢູ່ ຯລຯ ໂຜດຖັບພະທີ່ຮູ້ໄດ້ທາງກາຍ ຯລຯ ມີຢູ່ ຯລຯ ທຳມາຣົມທີ່ຮູ້ໄດ້ທາງໃຈ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ກໍມີຢູ່ ຖ້າພິກຂຸເພີດເພີນ ເຊີຍຊົມ ຍຶດຕິດທຳມາຣົມນັ້ນຢູ່[១] ລວມຄວາມວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ ຍ່ອມເປັນແນວນີ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ວິນຍານ (ຄວາມຮູ້ແຈ້ງອາລົມ) ທີ່ເຂົ້າເຖິງຮູບ ເມື່ອດຳຣົງຢູ່ ກໍມີຮູບເປັນອາລົມ ມີຮູບເປັນທີ່ຕັ້ງ ເຂົ້າໄປເສບສະເຫວີຍຄວາມເພີດເພີນ ຕັ້ງຢູ່ ເຖິງຄວາມຈະເລີນງອກງາມ ໄພບູນໄດ້ ພິກຂຸທັງຫຼາຍ ວິນຍານ ທີ່ເຂົ້າເຖິງເວທະນາ ຯລຯ ວິນຍານ ທີ່ເຂົ້າເຖິງສັນຍາ ຯລຯ ວິນຍານ ທີ່ເຂົ້າເຖິງສັງຂານ ເມື່ອດຳຣົງຢູ່ ກໍມີສັງຂານເປັນອາລົມ ມີສັງຂານເປັນທີ່ຕັ້ງ ເຂົ້າໄປເສບສະເຫວີຍຄວາມເພີດເພີນ ຕັ້ງຢູ່ເຖິງຄວາມຈະເລີນງອກງາມ ໄພບູນໄດ້ ລວມຄວາມວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ ຍ່ອມເປັນແນວນີ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ຖ້າຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ມີຢູ່ໃນກະວະລິງກາຣາຫານ (ອາຫານຄືຄຳເຂົ້າ) ວິນຍານ ກໍຕັ້ງຢູ່ ງອກງາມໃນກະວະລິງກາຣາຫານນັ້ນໄດ້ ວິນຍານ ຕັ້ງຢູ່ ງອກງາມໄດ້ໃນບ່ອນໃດ ການກ້າວລົງແຫ່ງນາມຮູບກໍມີໄດ້ໃນບ່ອນນັ້ນ ຄວາມກ້າວລົງແຫ່ງນາມຮູບມີຢູ່ໃນບ່ອນໃດ ຄວາມຈະເລີນແຫ່ງສັງຂານກໍມີໄດ້ໃນບ່ອນນັ້ນ ຄວາມຈະເລີນແຫ່ງສັງຂານມີຢູ່ໃນບ່ອນໃດ ຄວາມເກີດໃນພົບໃໝ່ກໍມີໄດ້ໃນບ່ອນນັ້ນ ຄວາມເກີດໃນພົບໃໝ່ມີຢູ່ໃນບ່ອນໃດ ຊາດ ຊະຣາ ມໍຣະນະ ຕໍ່ໄປກໍມີໄດ້ໃນບ່ອນນັ້ນ ຊາດ ຊະຣາ ມໍຣະນະ ຕໍ່ໄປ ມີຢູ່ໃນບ່ອນໃດ ເຮົາກໍກ່າວວ່າ ທີ່ນັ້ນມີຄວາມເສົ້າໂສກ ມີຄວາມ ໝົ່ນໝອງ ມີຄວາມຄັບແຄ້ນໃຈ ລວມຄວາມວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ ຍ່ອມເປັນຢ່າງນີ້

ພິກຂຸທັງຫຼາຍ ຖ້າຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກມີຢູ່ໃນ ຜັດສາຫານ (ອາຫານຄືຜັດສະ) ຯລຯ ພິກຂຸທັງຫຼາຍ ຖ້າຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກມີຢູ່ໃນມະໂນສັນເຈຕະນາຫານ (ອາຫານຄືມະໂນສັນເຈຕະນາ) ຯລຯ ພິກຂຸທັງຫຼາຍ ຖ້າຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກມີຢູ່ໃນວິນຍານາຫານ (ອາຫານຄືວິນຍານ) ວິນຍານກໍຕັ້ງຢູ່ ງອກງາມໃນວິນຍານາຫານນັ້ນໄດ້ ວິນຍານ ຕັ້ງຢູ່ງອກງາມໄດ້ໃນບ່ອນໃດ ການກ້າວລົງແຫ່ງນາມຮູບກໍມີໄດ້ໃນບ່ອນນັ້ນ ຄວາມກ້າວລົງແຫ່ງ ນາມຮູບມີຢູ່ໃນບ່ອນໃດ ຄວາມຈະເລີນແຫ່ງສັງຂານກໍມີໄດ້ໃນບ່ອນນັ້ນ ຄວາມຈະເລີນແຫ່ງສັງຂານມີຢູ່ໃນບ່ອນໃດ ຄວາມເກີດໃນພົບໃໝ່ກໍມີໄດ້ໃນບ່ອນນັ້ນ ຄວາມເກີດໃນພົບໃໝ່ມີຢູ່ໃນບ່ອນໃດ ຊາດ ຊະຣາ ມໍຣະນະ ຕໍ່ໄປກໍມີໄດ້ໃນບ່ອນນັ້ນ ຊາດ ຊະຣາ ມໍຣະນະ ຕໍ່ໄປ ມີຢູ່ໃນບ່ອນໃດ ເຮົາກໍກ່າວວ່າ ທີ່ນັ້ນ ມີຄວາມເສົ້າໂສກ ມີຄວາມໝົ່ນໝອງ ມີຄວາມຄັບແຄ້ນໃຈ ລວມຄວາມວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ ຍ່ອມເປັນແນວນີ້

ຄຳວ່າ ຈົມລົງໃນເຫດໃຫ້ລຸ້ມຫຼົງ ອະທິບາຍວ່າ ກາມມະຄຸນ ໕ ຕັດຮຽກວ່າ ເຫດໃຫ້ລຸ້ມຫຼົງ

ຄື ຮູບທີ່ຮູ້ໄດ້ທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ສຽງທີ່ຮູ້ໄດ້ທາງຫູ ຯລຯ ກິ່ນທີ່ຮູ້ໄດ້ທາງດັງ ຯລຯ ຣົດທີ່ຮູ້ໄດ້ທາງລີ້ນ ຯລຯ ໂຜດຖັບພະທີ່ຮູ້ໄດ້ທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຍ້ອນເຫດໃດ ກາມມະຄຸນ ໕ ຈຶ່ງຕັດຮຽກວ່າ ເຫດໃຫ້ລຸ້ມຫຼົງ ຍ້ອນສ່ວນຫຼາຍເທວະດາແລະມະນຸດ ຍ່ອມຫຼົງ ລຸ້ມຫຼົງ ຫຼົງງົມງວາຍໃນກາມມະຄຸນ ໕ ເທວະດາແລະມະນຸດເຫຼົ່ານັ້ນ ຈຶ່ງຊື່ວ່າ ເປັນຜູ້ຫຼົງ ລຸ້ມຫຼົງ ຫຼົງງົມງວາຍ ຄື ຖືກອະວິດຊາເຮັດໃຫ້ມືດບອດ ຫຸ້ມຫໍ່ ໂອບລ້ອມ ຫ້ອມລ້ອມ ຄອບຄຸມ ປົກຄຸມ ປົດບັງໄວ້ ຍ້ອນເຫດນັ້ນ ກາມມະຄຸນ ໕ ຈຶ່ງຕັດຮຽກວ່າ ເປັນເຫດໃຫ້ລຸ້ມຫຼົງ

ຄຳວ່າ ຈົມລົງໃນເຫດໃຫ້ລຸ້ມຫຼົງ ໄດ້ແກ່ ຈົມລົງ ມົກມຸ້ນ ຢັ່ງລົງ ດິ່ງລົງ ໃນເຫດໃຫ້ລຸ້ມຫຼົງ ລວມຄວາມວ່າ ນໍຣະຊົນ ຯລຯ ເມື່ອດຳຣົງຕົນຢູ່ ກໍຈົມລົງໃນເຫດໃຫ້ລຸ້ມຫຼົງ

## ວ່າດ້ວຍວິເວກ ໓ ຢ່າງ

ຄຳວ່າ ວິເວກ ໃນຄຳວ່າ ຜູ້ເປັນເຊັ່ນນັ້ນແລ ຍ່ອມຢູ່ໄກຈາກວິເວກ ໄດ້ແກ່ ວິເວກ ໓ ຢ່າງ ຄື (໑) ກາຍວິເວກ (ຄວາມສະຫງັດກາຍ) (໒) ຈິດຕະວິເວກ (ຄວາມສະຫງັດໃຈ) (໓) ອຸປະທິວິເວກ (ຄວາມສະຫງັດອຸປະທິ)

ກາຍວິເວກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ່ອມໃຊ້ສອຍເສນາສະນະທີ່ສະຫງັດ ຄື ປ່າ ເຫງົ້າຕົ້ນໄມ້ ພູເຂົາ ຮ່ອມພູ ປ່ອງພູ ປ່າຊ້າ ປ່າດົງດິບ ກາງແຈ້ງ ກອງເຟືອງ ແລະມີກາຍສະຫງັດຢູ່ ຄື ຍ່າງອົງດຽວ ຢືນອົງດຽວ ນັ່ງອົງດຽວ ນອນອົງດຽວ ເຂົ້າໝູ່ບ້ານບິນທະບາດອົງດຽວ ກັບອົງດຽວ ນັ່ງໃນບ່ອນລັບອົງດຽວ ອະທິຖານຈົງກົມອົງດຽວ ທ່ຽວໄປ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປລຳພັງອົງດຽວ ນີ້ຊື່ວ່າກາຍວິເວກ

ຈິດຕະວິເວກ ເປັນແນວໃດ?

ຄື ຜູ້ບັນລຸປະຖົມຊານຍ່ອມມີຈິດສະຫງັດຈາກນິວອນ ຜູ້ບັນລຸທຸຕິຍະຊານຍ່ອມມີຈິດສະຫງັດຈາກວິຕົກແລະວິຈານ ຜູ້ບັນລຸຕະຕິຍະຊານຍ່ອມມີຈິດສະຫງັດຈາກປີຕິ ຜູ້ບັນລຸຈະຕຸດຖະຊານຍ່ອມມີ ຈິດສະຫງັດຈາກສຸກແລະທຸກ ຜູ້ບັນລຸອາກາສານັນຈາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກ ຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ ຜູ້ບັນລຸວິນຍານັນຈາຍະຕະນະສະມາບັດ ຍ່ອມມີ ຈິດສະຫງັດຈາກອາກາສານັນຈາຍະຕະນະສັນຍາ ຜູ້ບັນລຸອາກິນຈັນຍາຍະ

ຕະນະສະມາບັດ[໗]ຍ່ອມມີຈິດ ສະຫງັດຈາກວິນຍານັນຈາຍະຕະນະສັນຍາ ຜູ້ບັນລຸເນວະສັນຍານາສັນຍາຍະຕະນະສະມາບັດ[໘] ຍ່ອມມີຈິດສະຫງັດຈາກອາກິນຈັນຍາຍະຕະນະສັນຍາ

ຜູ້ເປັນພຣະໂສດາບັນຍ່ອມມີຈິດສະຫງັດຈາກສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ທິດຖານຸໄສ ວິຈິກິດສານຸໄສ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບສັກກາຍະທິດຖິເປັນຕົ້ນນັ້ນ

ຜູ້ເປັນພຣະສະກະທາຄາມີ ຍ່ອມມີຈິດສະຫງັດຈາກກາມຣາຄະສັງໂຍດ ປະຕິຄະສັງໂຍດຢ່າງຫຍາບ ກາມຣາຄານຸໄສ ປະຕິຄານຸໄສຢ່າງຫຍາບ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບກາມຣາຄະສັງໂຍດເປັນຕົ້ນນັ້ນ

ຜູ້ເປັນພຣະອະນາຄາມີ ຍ່ອມມີຈິດສະຫງັດຈາກກາມຣາຄະສັງໂຍດ ປະຕິຄະສັງໂຍດຢ່າງລະອຽດ ກາມຣາຄານຸໄສ ປະຕິຄານຸໄສ ຢ່າງລະອຽດ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບກາມຣາຄະສັງໂຍດເປັນຕົ້ນນັ້ນ

ຜູ້ເປັນພຣະອະຣະຫັນ ຍ່ອມມີຈິດສະຫງັດຈາກຮູບຣາຄະ ອະຮູບຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ເຫຼົ່າກິເລດທີ່ຢູ່ໃນພວກດຽວກັບຮູບຣາຄະເປັນຕົ້ນນັ້ນ ແລະສັງຂານນິມິດທັງປວງໃນພາຍນອກ ນີ້ຊື່ວ່າຈິດຕະວິເວກ

ອຸປະທິວິເວກ ເປັນແນວໃດ?

ຄື ກິເລດກໍດີ ຂັນກໍດີ ອະພິສັງຂານກໍດີ ຕັດຮຽກວ່າ ອຸປະທິ ອະມະຕະນິບພານ ຕັດຮຽກວ່າ ອຸປະທິວິເວກ ຄື ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ນີ້ຊື່ວ່າອຸປະທິວິເວກ

ກາຍວິເວກຍ່ອມມີແກ່ບຸກຄົນຜູ້ມີກາຍຫຼີກອອກແລ້ວ ຍິນດີໃນເນກຂຳມະ ຈິດຕະວິເວກຍ່ອມມີແກ່ບຸກຄົນຜູ້ມີຈິດບໍລິສຸດ ເຖິງຄວາມເປັນຜູ້ຜ່ອງແຜ້ວຍິ່ງ ແລະອຸປະທິວິເວກຍ່ອມມີແກ່ບຸກຄົນຜູ້ປາສະຈາກອຸປະທິ ບັນລຸນິບພານອັນປາສະຈາກປັດໄຈປຸງແຕ່ງແລ້ວ

ຄຳວ່າ ໄກຈາກວິເວກ ອະທິບາຍວ່າ ຜູ້ຂ້ອງຢູ່ໃນຖ້ຳແນວນີ້ ຖືກກິເລດຈຳນວນຫຼາຍ ປິດບັງໄວ້ແນວນີ້ ຈົມລົງໃນເຫດໃຫ້ລຸ້ມຫຼົງແນວນີ້ ຍ່ອມຢູ່ໄກຈາກກາຍວິເວກແດ່ ໄກຈາກຈິດຕະວິເວກແດ່ ໄກຈາກອຸປະທິວິເວກແດ່ ຄື ໄກ ຫ່າງໄກ ແສນໄກ ບໍ່ໃກ້ ບໍ່ໃກ້ຄຽງ ບໍ່ຊິດ ບໍ່ໃກ້ຊິດ

ຄຳວ່າ ຜູ້ເປັນເຊັ່ນນັ້ນ ໄດ້ແກ່ ຜູ້ເປັນເຊັ່ນນັ້ນ ຄື ຜູ້ເປັນແນວນັ້ນ ຜູ້ດຳຣົງຢູ່ແນວນັ້ນ ຜູ້ເປັນປະການນັ້ນ ຜູ້ມີສ່ວນແນວນັ້ນ ຈົມລົງໃນເຫດໃຫ້ລຸ້ມຫຼົງ ລວມຄວາມວ່າ ຜູ້ເປັນເຊັ່ນນັ້ນຍ່ອມຢູ່ໄກຈາກວິເວກ

## ວ່າດ້ວຍກາມ ໒ ຢ່າງ

ຄຳວ່າ ກາມ ໃນຄຳວ່າ ຍ້ອນກາມທັງຫຼາຍໃນໂລກບໍ່ເປັນຂອງທີ່ນໍຣະຊົນລະໄດ້ງ່າຍເລີຍ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ

ວັດຖຸກາມ ຄືອັນໃດ?

ຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ໜ້າພໍໃຈ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຍິງ ຊາຍ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ທີ່ນາ ທີ່ສວນ ເງິນ ຄຳ ໝູ່ບ້ານ ນິຄົມ ຣາດຊະທາ ນີ ແຄວ້ນ ຊົນນະບົດ ກອງພົນຮົບ ຄັງຫຼວງ ແລະວັດຖຸທີ່ໜ້າຍິນດີແນວໃດແນວໜຶ່ງ (ເຫຼົ່ານີ້ ) ຊື່ວ່າ ວັດຖຸກາມ

ອີກໄນໜຶ່ງ ກາມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ກາມທີ່ເປັນພາຍໃນ ທີ່ເປັນພາຍນອກ ທີ່ເປັນທັງພາຍໃນ ແລະພາຍນອກ ກາມຢ່າງຫຍາບ ຢ່າງກາງ ຢ່າງປະນີດ ກາມທີ່ເປັນຂອງສັດໃນອະບາຍ ທີ່ເປັນຂອງມະນຸດ ທີ່ເປັນຂອງທິບ ກາມທີ່ຜາກົດສະເພາະ ໜ້າ ທີ່ເນຣະມິດຂຶ້ນເອງ ທີ່ບໍ່ໄດ້ເນຣະມິດຂຶ້ນເອງ ທີ່ຜູ້ອື່ນເນຣະມິດໃຫ້ ກາມທີ່ມີຜູ້ຄອບຄອງ ທີ່ບໍ່ມີຜູ້ ຄອບຄອງ ທີ່ຍຶດຖືວ່າເປັນຂອງເຮົາ ທີ່ບໍ່ຍຶດຖືວ່າເປັນຂອງເຮົາ ສະພາວະທຳທີ່ເປັນກາມາວະ ຈອນ ທີ່ເປັນຮູບປາວະຈອນ ທີ່ເປັນອະຮູບປາວະຈອນແມ່ນທັງປວງ ກາມທີ່ເປັນເຫດເກີດແຫ່ງ ຕັນຫາ ເປັນອາລົມແຫ່ງຕັນຫາ ຊື່ວ່າກາມ ຍ້ອນມີຄວາມໝາຍວ່າ ໜ້າປາຖະໜາ ໜ້າຍິນດີ ໜ້າ ລຸ້ມຫຼົງ ເຫຼົ່ານີ້ຮຽກວ່າ ວັດຖຸກາມ

ກິເລດກາມ ຄືອັນໃດ?

ຄື ຄວາມພໍໃຈ ຄວາມກຳໜັດ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ຄວາມດຳຣິ ຄວາມກຳໜັດ ຄວາມກຳໜັດດ້ວຍອຳນາດຄວາມດຳຣິ ຊື່ວ່າ ກາມ ໄດ້ແກ່ ຄວາມພໍໃຈ ດ້ວຍ ອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍ ອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມມີເຍື່ອໃຍ ດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍ ອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍອຳນາດຄວາມຕ້ອງການ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເຄື່ອງປະກອບຄືຄວາມຕ້ອງການ ກິເລດເຄື່ອງຍຶດໝັ້ນຄືຄວາມຕ້ອງການ ກິເລດເຄື່ອງກັ້ນ ຈິດຄືຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍ

(ສົມຈິງດັ່ງທີ່ພຣະເຈົ້າອັດທະມາສົກເປ່ງອຸທານວ່າ)

ເຈົ້າກາມເອີຍ ເຮົາເຫັນຮາກເຫງົ້າຂອງເຈົ້າແລ້ວ
ເຈົ້າເກີດຍ້ອນຄວາມດຳຣິ ເຮົາຈັກບໍ່ດຳຣິຮອດເຈົ້າອີກ

ເຈົ້າຈັກບໍ່ສາມາດເກີດມາເປັນແນວນີ້ໄດ້ອີກແລ້ວເຈົ້າກາມເອີຍ
ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ

ຄຳວ່າ ຍ້ອນການທັງຫຼາຍໃນໂລກບໍ່ເປັນຂອງທີ່ນໍຣະຊົນລະໄດ້ງ່າຍເລີຍ ອະທິບາຍ ວ່າ ຍ້ອນການທັງຫຼາຍໃນໂລກເປັນຂອງທີ່ນໍຣະຊົນລະໄດ້ຍາກ ຄື ສະລະໄດ້ຍາກ ສະລະອອກໄດ້ຍາກ ຍ່ຳຍີໄດ້ຍາກ ແກ້ອອກໄດ້ຍາກ ແຫວກອອກໄດ້ຍາກ ຂ້າມໄດ້ຍາກ ຂ້າມພົ້ນໄດ້ຍາກ ກ້າວພົ້ນໄດ້ຍາກ ກັບຕົວຫຼີກໄດ້ຍາກ ລວມຄວາມວ່າ ຍ້ອນການທັງຫຼາຍໃນໂລກບໍ່ເປັນຂອງທີ່ນໍຣະຊົນລະໄດ້ງ່າຍເລີຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ນໍຣະຊົນຜູ້ຂ້ອງຢູ່ໃນຖ້ຳ ຖືກກິເລດຈຳນວນຫຼາຍປົດບັງໄວ້
ເມື່ອດຳຣົງຕົນຢູ່ (ຢ່າງນີ້) ກໍຈົມລົງໃນເຫດໃຫ້ລຸ້ມຫຼົງ
ຜູ້ເປັນເຊັ່ນນັ້ນແລ ຍ່ອມຢູ່ໄກຈາກວິເວກ
ຍ້ອນການທັງຫຼາຍໃນໂລກບໍ່ເປັນຂອງທີ່ນໍຣະຊົນລະໄດ້ງ່າຍເລີຍ

[໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສັດເຫຼົ່ານັ້ນ ມີຄວາມປາຖະໜາເປັນຕົ້ນເຫດ
ຕິດພັນຢູ່ກັບຄວາມພໍໃຈໃນພົບ
ມຸ້ງຫວັງ (ກາມ) ໃນການພາຍຫຼັງ ຫຼື ໃນການກ່ອນ
ປາຖະໜາກາມເຫຼົ່ານີ້ແລະກາມທີ່ມີຢູ່ກ່ອນ
ຍ່ອມເປັນຜູ້ຫຼຸດພົ້ນໄດ້ຍາກ (ແລະ) ເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ

ຄຳວ່າ ມີຄວາມປາຖະໜາເປັນຕົ້ນເຫດ ຕິດພັນຢູ່ກັບຄວາມພໍໃຈໃນພົບ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມປາຖະໜາ

ຄື ຄວາມກຳໜັດ ຄວາມກຳໜັດແຮງ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມເພີດເພີນ ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄວາມກຳໜັດແຮງແຫ່ງຈິດ ຄວາມຢາກ ຄວາມສະຍົບ ຄວາມມົກມຸ້ນ ຄວາມຫື່ນ ຄວາມຫື່ນກະຫາຍ ຄວາມຂ້ອງຢູ່ ຄວາມຈົມຢູ່ ທຳມະຊາດທີ່ເຮັດໃຫ້ພຸກພ່ານ ທຳມະຊາດທີ່ຫຼອກລວງ ທຳມະຊາດ ທີ່ຍັງສັດໃຫ້ເກີດ ທຳມະຊາດທີ່ຍັງສັດໃຫ້ເກີດພ້ອມ ທຳມະຊາດທີ່ຮ້ອຍຮັດ ທຳມະຊາດທີ່ມີຂ່າຍ ທຳມະຊາດທີ່ກຳຊາບໃຈ ທຳມະຊາດທີ່ຊ່ານໄປ ທຳມະຊາດເປັນຄືເສັ້ນດ້າຍ ທຳມະຊາດທີ່ແຜ່ໄປ ທຳມະຊາດທີ່ປະມວນມາ ທຳ

ມະຊາດທີ່ເປັນເພື່ອນ ຄວາມຄະນຶງຫາ ຕັນຫາທີ່ນໍາພາໄປສູ່ພົບ ຕັນຫາເປັນຄືປ່າ ຕັນຫາເປັນຄືປ່າທຶບ ຄວາມເຊີຍຊິດ ຄວາມມີເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງ ກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງໃນຮູບ ຄວາມຫວັງໃນສຽງ ຄວາມຫວັງໃນກິ່ນ ຄວາມຫວັງໃນຣົດ ຄວາມຫວັງໃນໂຜດຖັບພະ ຄວາມຫວັງໃນລາບ ຄວາມຫວັງໃນຊັບ ຄວາມຫວັງໃນບຸດ ຄວາມຫວັງໃນຊີວິດ ທໍາມະຊາດທີ່ຊິ່ມ ທໍາມະຊາດທີ່ຊິ່ມເລື້ອຍ ໆ ທໍາມະຊາດທີ່ຊິ່ມຍິ່ງ ຄວາມຊິ່ມ ກິຣິຍາທີ່ຊິ່ມ ພາວະທີ່ຊິ່ມ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່ລະໂມບ ທໍາມະຊາດທີ່ເຮັດໃຫ້ຫວັ່ນໄຫວ ພາວະທີ່ຕ້ອງການແຕ່ອາລົມດີ ໆ ຄວາມກໍາໜັດໃນຖານະອັນບໍ່ຄວນ ຄວາມໂລບເກີນພໍດີ ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມໃຝ່ຫາ ຄວາມໝາຍປອງການຕັນຫາ ພະວະຕັນຫາ ວິພະວະຕັນຫາ ຕັນຫາໃນຮູບພົບ ຕັນຫາໃນອະຮູບພົບ ຕັນຫາໃນນິໂຣດ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທໍາມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກ ອຸປະກິເລດ ອະນຸໄສ ປະຣິຍຸດຖານ ຕັນຫາເປັນຄືເຄືອເຂົາ ຄວາມປາຖະໜາວັດຖຸຕ່າງ ໆ ຮາກເຫງົ້າແຫ່ງທຸກ ເຫດແຫ່ງທຸກ ແດນເກີດແຫ່ງທຸກ ບ້ວງແຫ່ງມານ ເບັດແຫ່ງມານ ວິໄສແຫ່ງມານ ຕັນຫາເປັນຄືແມ່ນໍ້າ ຕັນຫາເປັນຄືຕາໜ່າງ ຕັນຫາ ເໝືອນໂຊ່ຕວນ ຕັນຫາເໝືອນມະຫາສະມຸດ ອະພິດຊາ ອະກຸສົນມູນຄືໂລພະ

ຄໍາວ່າ ມີຄວາມປາຖະໜາເປັນຕົ້ນເຫດ ໄດ້ແກ່ ມີຄວາມປາຖະໜາເປັນຕົ້ນເຫດ ຄື ມີຄວາມປາຖະໜາເປັນສາເຫດ ມີຄວາມປາຖະໜາເປັນປັດໄຈ ມີຄວາມປາຖະໜາເປັນເຫດ ມີຄວາມປາຖະໜາເປັນແດນເກີດ ລວມຄວາມວ່າ ມີຄວາມປາຖະໜາເປັນຕົ້ນເຫດ

ຄໍາວ່າ ຕິດພັນຢູ່ກັບຄວາມພໍໃຈໃນພົບ ອະທິບາຍວ່າ ຄວາມພໍໃຈໃນພົບຢ່າງດຽວ ຄືສຸກຂະເວທະນາ

ຄວາມພໍໃຈໃນພົບ ໒ ຢ່າງ ຄື

໑. ສຸກຂະເວທະນາ
໒. ວັດຖຸທີ່ໜ້າປາຖະໜາ

ຄວາມພໍໃຈໃນພົບ ໓ ຢ່າງ ຄື

໑. ຄວາມເປັນໜຸ່ມສາວ
໒. ຄວາມບໍ່ມີໂຣກ
໓. ຊີວິດ

ຄວາມພໍໃຈໃນພົບ ໔ ຢ່າງ ຄື

໑. ລາບ ໔. ຍົດ
໓. ສັນເສີນ ໔. ສຸກ

ຄວາມພໍໃຈໃນພົບ ໕ ຢ່າງ ຄື

໑. ຮູບທີ່ໜ້າພໍໃຈ ໔. ສຽງທີ່ໜ້າພໍໃຈ
໓. ກິ່ນທີ່ໜ້າພໍໃຈ ໔. ຣົດທີ່ໜ້າພໍໃຈ
໕. ໂຜດຖັບພະທີ່ໜ້າພໍໃຈ

ຄວາມພໍໃຈໃນພົບ ໖ ຢ່າງ ຄື

໑. ຄວາມສົມບູນແຫ່ງຕາ ໔. ຄວາມສົມບູນແຫ່ງຫູ
໓. ຄວາມສົມບູນແຫ່ງດັງ ໔. ຄວາມສົມບູນແຫ່ງລີ້ນ
໕. ຄວາມສົມບູນແຫ່ງກາຍ ໖. ຄວາມສົມບູນແຫ່ງໃຈ

ຜູ້ຕິດພັນຢູ່ກັບຄວາມພໍໃຈໃນພົບ ໄດ້ແກ່ ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວພັນໃນສຸກຂະເວທະນາ ຯລຯ ໃນວັດຖຸທີ່ໜ້າປາຖະໜາ ຯລຯ ໃນຄວາມເປັນໜຸ່ມສາວ ຯລຯ ໃນຄວາມ ບໍ່ມີໂຣກ ຯລຯ ໃນຊີວິດ ຯລຯ ໃນລາບ ຯລຯ ໃນຍົດ ຯລຯ ໃນສັນເສີນ ຯລຯ ໃນສຸກ ຯລຯ ໃນຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ທີ່ໜ້າພໍໃຈ ຯລຯ ໃນຄວາມສົມບູນແຫ່ງຕາ ຯລຯ ຫູ ຯລຯ ດັງ ຯລຯ ລີ້ນ ຯລຯ ກາຍ ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວພັນໃນຄວາມສົມບູນແຫ່ງໃຈ ລວມຄວາມວ່າ ມີຄວາມປາຖະໜາເປັນຕົ້ນເຫດ ຕິດພັນຢູ່ກັບຄວາມພໍໃຈໃນພົບ

ຄຳວ່າ ສັດເຫຼົ່ານັ້ນ ຯລຯ ຍ່ອມເປັນຜູ້ຫຼຸດພົ້ນໄດ້ຍາກ (ແລະ) ເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ ອະທິບາຍວ່າ ທຳທີ່ເປັນທີ່ຕັ້ງແຫ່ງຄວາມພໍໃຈໃນພົບເຫຼົ່ານັ້ນ ອັນສັດຫຼຸດພົ້ນໄດ້ຍາກ ຫຼືສັດທັງຫຼາຍປົດເປື້ອງ (ຕົນ) ໄດ້ຍາກ ຈາກທຳທີ່ເປັນທີ່ຕັ້ງແຫ່ງຄວາມພໍໃຈໃນພົບນັ້ນ ໆ

ທຳທີ່ເປັນທີ່ຕັ້ງແຫ່ງຄວາມພໍໃຈໃນພົບເຫຼົ່ານັ້ນ ອັນສັດຫຼຸດພົ້ນໄດ້ຍາກ ເປັນແນວໃດ?

ຄື ສຸກຂະເວທະນາ ອັນສັດຫຼຸດພົ້ນໄດ້ຍາກ ຄື ປົດເປື້ອງໄດ້ຍາກ ຊຶ່ງຕົວໄດ້ຍາກ ແກ້ອອກໄດ້ຍາກ ແຫວກອອກໄດ້ຍາກ ຂ້າມໄດ້ຍາກ ຂ້າມພົ້ນໄດ້ຍາກ ກ້າວພົ້ນໄດ້ຍາກ ກັບຕົວຫຼີກໄດ້ຍາກ ວັດຖຸທີ່ໜ້າປາຖະໜາ ຯລຯ ຄວາມເປັນໜຸ່ມສາວ ຯລຯ ຄວາມບໍ່ມີໂຣກ ຯລຯ ຊີວິດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຮູບທີ່ໜ້າພໍໃຈ ຯລຯ ສຽງທີ່ໜ້າພໍໃຈ ຯລຯ ກິ່ນທີ່ໜ້າພໍໃຈ ຯລຯ ຣົດທີ່ໜ້າພໍໃຈ ຯລຯ ໂຜດຖັບພະທີ່ໜ້າພໍໃຈ ຯລຯ

ຄວາມສົມບູນແຫ່ງຕາ ຯລຯ ຄວາມສົມບູນແຫ່ງຫູ ຯລຯ ຄວາມສົມບູນແຫ່ງດັງ ຯລຯ ຄວາມສົມບູນແຫ່ງລີ້ນ ຯລຯ ຄວາມສົມບູນແຫ່ງກາຍ ຯລຯ ຄວາມສົມບູນແຫ່ງໃຈ ອັນສັດຫຼຸດພົ້ນໄດ້ຍາກ ຄື ປົດເປື້ອງໄດ້ຍາກ ຊົງຕົວໄດ້ຍາກ ແກ້ອອກໄດ້ຍາກ ແຫວກອອກໄດ້ຍາກ ຂ້າມໄດ້ຍາກ ຂ້າມພົ້ນໄດ້ຍາກ ກ້າວພົ້ນໄດ້ຍາກ ກັບຕົວຫຼີກອອກໄດ້ຍາກ ທຳທີ່ເປັນບ່ອນຕັ້ງແຫ່ງຄວາມພໍໃຈໃນພົບເຫຼົ່ານັ້ນ ອັນສັດຫຼຸດພົ້ນໄດ້ຍາກເປັນແນວນີ້

ສັດທັງຫຼາຍປົດເປື້ອງ (ຕົນ) ໄດ້ຍາກ ຈາກທຳທີ່ເປັນທີ່ຕັ້ງແຫ່ງຄວາມພໍໃຈໃນພົບນັ້ນເປັນແນວໃດ?

ຄື ສັດທັງຫຼາຍປົດເປື້ອງ (ຕົນ) ໄດ້ຍາກ ຄື ປົດເປື້ອງຂຶ້ນໄດ້ຍາກ ຊົງຕົວໄດ້ຍາກ ຊົງຕົວຂຶ້ນໄດ້ຍາກ ຍົກຕົວຂຶ້ນໄດ້ຍາກ ຍົກຕົວຂຶ້ນໄດ້ຍາກຢ່າງຍິ່ງ ແກ້ອອກໄດ້ຍາກ ແຫວກອອກໄດ້ຍາກ ຂ້າມໄດ້ຍາກ ຂ້າມພົ້ນໄດ້ຍາກ ກ້າວພົ້ນໄດ້ຍາກ ກັບຕົວຫຼີກໄດ້ຍາກ ຈາກສຸກຂະເວທະນາ ຯລຯ ຈາກວັດຖຸທີ່ໜ້າປາຖະໜາ ຯລຯ ຈາກຄວາມເປັນໜຸ່ມສາວ ຯລຯ ຈາກຄວາມບໍ່ມີໂຣກ ຯລຯ ຈາກຊີວິດ ຯລຯ ຈາກລາບ ຯລຯ ຈາກຍົດ ຯລຯ ຈາກສັນເສີນ ຯລຯ ຈາກສຸກ ຯລຯ ຈາກຮູບ ທີ່ໜ້າພໍໃຈ ຯລຯ ຈາກສຽງທີ່ໜ້າພໍໃຈ ຯລຯ ຈາກກິ່ນທີ່ໜ້າພໍໃຈ ຯລຯ ຈາກຣົດທີ່ໜ້າພໍໃຈ ຯລຯ ຈາກ ໂຜດຖັບພະທີ່ໜ້າພໍໃຈ ຯລຯ ຈາກຄວາມສົມບູນແຫ່ງຕາ ຯລຯ ຈາກຄວາມສົມບູນແຫ່ງຫູ ຯລຯ ຈາກ ຄວາມສົມບູນແຫ່ງດັງ ຯລຯ ຈາກຄວາມສົມບູນແຫ່ງລີ້ນ ຯລຯ ຈາກຄວາມສົມບູນແຫ່ງກາຍ ປົດເປື້ອງ (ຕົນ) ໄດ້ຍາກ ຄື ປົດເປື້ອງຂຶ້ນໄດ້ຍາກ ຊົງຕົວໄດ້ຍາກ ຊົງຕົວຂຶ້ນໄດ້ຍາກ ຍົກຕົວຂຶ້ນໄດ້ຍາກ ຍົກຕົວຂຶ້ນໄດ້ຍາກຢ່າງຍິ່ງ ແກ້ອອກໄດ້ຍາກ ແຫວກອອກໄດ້ຍາກ ຂ້າມໄດ້ຍາກ ຂ້າມພົ້ນໄດ້ຍາກ ກ້າວພົ້ນໄດ້ຍາກ ກັບຕົວຫຼີກໄດ້ຍາກ ຈາກຄວາມສົມບູນແຫ່ງໃຈ ສັດທັງຫຼາຍປົດເປື້ອງ (ຕົນ) ໄດ້ຍາກ ຈາກທຳທີ່ເປັນບ່ອນຕັ້ງແຫ່ງຄວາມພໍໃຈໃນພົບນັ້ນ ໆ ເປັນແນວນີ້ ລວມຄວາມວ່າ ສັດເຫຼົ່ານັ້ນ ຯລຯ ຍ່ອມເປັນຜູ້ຫຼຸດພົ້ນໄດ້ຍາກ

ຄຳວ່າ ເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ ອະທິບາຍວ່າ ສັດເຫຼົ່ານັ້ນ ຕົນເອງກໍຈົມດິ່ງຢູ່ ຈຶ່ງບໍ່ສາມາດດຶງຈັບຄົນອື່ນທີ່ຈົມດິ່ງຢູ່ແລ້ວຂຶ້ນມາໄດ້ ສົມຈິງ ດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດ ໄວ້ວ່າ ຈຸນທະ ຂໍ້ທີ່ບຸກຄົນເຊິ່ງຕົນເອງກໍຈົມດິ່ງຢູ່ຈັກດຶງຈັບຜູ້ອື່ນທີ່ຈົມດິ່ງຢູ່ແລ້ວຂຶ້ນມາໄດ້ ເປັນໄປບໍ່ໄດ້ເລີຍ ຈຸນທະ ຂໍ້ທີ່ບຸກຄົນຜູ້ບໍ່ໄດ້ເຝິກຝົນ ບໍ່ໄດ້ອົບຮົມ ຍັງບໍ່ໄດ້ດັບກິເລດດ້ວຍຕົນເອງ ຈັກເຝິກຝົນອົບຮົມຜູ້ອື່ນ ເຮັດຜູ້ອື່ນໃຫ້ດັບກິເລດ ເປັນໄປບໍ່ໄດ້ເລີຍ (ສັດເຫຼົ່ານັ້ນ) ຈຶ່ງ ຊື່ວ່າເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ ເປັນແນວນີ້

ອີກໄນໜຶ່ງ ບໍ່ມີໃຜອື່ນທີ່ຈະເຮັດໃຫ້ສັດເຫຼົ່ານັ້ນຫຼຸດພົ້ນໄດ້ ຖ້າສັດເຫຼົ່ານັ້ນຈະເພິ່ງຫຼຸດພົ້ນໄດ້ ສັດເຫຼົ່ານັ້ນເມື່ອປະຕິບັດຊອບ ປະຕິບັດເໝາະສົມ ປະຕິບັດບໍ່ເປັນຂ້າເສິກ ປະຕິບັດເອື້ອປະໂຫຍດ ປະຕິບັດທຳຖືກຕ້ອງຕາມຫຼັກທຳດ້ວຍຕົນເອງ ກໍຈະເພິ່ງຫຼຸດພົ້ນໄດ້ດ້ວຍເຫື່ອແຮງ

ດ້ວຍກຳລັງ ດ້ວຍຄວາມພາກພຽນ ດ້ວຍຄວາມບາກບັ່ນ ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍກຳລັງຂອງບຸຣຸດ ດ້ວຍຄວາມພາກພຽນຂອງບຸຣຸດ ດ້ວຍຄວາມສູ້ຊົນຂອງ ບຸຣຸດຂອງຕົນເອງເທົ່ານັ້ນ (ສັດເຫຼົ່ານັ້ນ) ຈຶ່ງຊື່ວ່າເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ ເປັນຢ່າງນີ້

ສົມຈິງ ດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ໂທຕະກະ ເຮົາບໍ່ສາມາດປົດເປື້ອງຜູ້ໃດ
ທີ່ມີຄວາມສົງໄສໃນໂລກໄດ້
ແຕ່ທ່ານເມື່ອຮູ້ແຈ້ງທຳອັນປະເສີດ
ກໍຈະຂ້າມໂອຄະນີ້ໄດ້ເອງ ດ້ວຍປະການດັ່ງນີ້
(ສັດເຫຼົ່ານັ້ນ) ຈຶ່ງຊື່ວ່າ ເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ ເປັນແນວນີ້

ສົມຈິງ ດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຕົນເຮັດຊົ່ວເອງ ກໍເສົ້າໝອງເອງ ບໍ່ເຮັດຊົ່ວ ກໍບໍລິສຸດເອງ
ຄວາມບໍລິສຸດແລະບໍ່ບໍລິສຸດເປັນຂອງສະເພາະຕົນ
ຄົນອື່ນຈະເຮັດຄົນອື່ນໃຫ້ບໍລິສຸດບໍ່ໄດ້
ສັດເຫຼົ່ານັ້ນຈຶ່ງຊື່ວ່າ ເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ ເປັນແນວນີ້

ສົມຈິງ ດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສັນນັ້ນຄືກັນແລພາມ ນິບພານມີຢູ່ ທາງໄປນິບພານມີຢູ່ ເຮົາ (ຕະຖາຄົດ) ຜູ້ຊັກຊວນກໍມີຢູ່ ກໍເມື່ອເປັນເຊັ່ນນີ້ ສາວົກທີ່ເຮົາສັ່ງສອນຢູ່ແນວນີ້ ພໍ່າສອນຢູ່ແນວນີ້ ບາງພວກສຳເລັດນິບພານອັນເຖິງທີ່ສຸດໂດຍສ່ວນດຽວ ບາງພວກກໍບໍ່ສຳເລັດ ໃນເລື້ອງນີ້ ເຮົາຈະເຮັດແນວໃດໄດ້ ຕະຖາຄົດກໍເປັນແຕ່ຜູ້ບອກທາງ ພຣະພຸດທະເຈົ້າກໍພຽງບອກທາງໃຫ້ ຜູ້ທີ່ປະຕິບັດດ້ວຍຕົນເອງເທົ່ານັ້ນ ຈຶ່ງຈະເພິ່ງ ຫຼຸດພົ້ນໄດ້ ສັດເຫຼົ່ານັ້ນຈຶ່ງຊື່ວ່າເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ ແນວນີ້ແດ່ ລວມຄວາມວ່າ ສັດເຫຼົ່ານັ້ນ ຍ່ອມເປັນຜູ້ຫຼຸດພົ້ນໄດ້ຍາກ (ແລະ) ເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ

ຄຳວ່າ ມຸ້ງຫວັງ (ກາມ) ໃນການພາຍຫຼັງ ຫຼືໃນການກ່ອນ ອະທິບາຍວ່າ ອະນາຄົດຕັດຮຽກວ່າ ໃນການພາຍຫຼັງ ອະດີດ ຕັດຮຽກວ່າ ໃນການກ່ອນ ອີກໄນໜຶ່ງ ອະນາຄົດໃກ້ອະດີດກໍດີ ປັດຈຸບັນໃກ້ອະດີດກໍດີ ຕັດຮຽກວ່າ ໃນການພາຍຫຼັງ ອະດີດໃກ້ອະນາຄົດກໍດີ ປັດຈຸບັນໃກ້ອະນາຄົດກໍດີ ຕັດຮຽກວ່າ ໃນການກ່ອນ

ບຸກຄົນທຳຄວາມມຸ້ງຫວັງ (ກາມ) ໃນການກ່ອນແນວໃດ?

ຄື ບຸກຄົນຍ່ອມຫວນຣະນຶກເຖິງຄວາມເພີດເພີນໃນອາລົມນັ້ນວ່າ ໃນອະດີດອັນຍາວນານເຮົາໄດ້ມີຮູບແນວນີ້ມາແລ້ວ ຯລຯ ໄດ້ມີເວທະນາແນວນີ້ມາແລ້ວ ຯລຯ ໄດ້ມີສັນຍາແນວນີ້ມາ

ແລ້ວ ຯລຯ ໄດ້ມີສັງຂານແນວນີ້ມາແລ້ວ ບຸກຄົນຍ່ອມທວນຣະນຶກເຖິງຄວາມເພີດເພີນໃນອາລົມ ນັ້ນວ່າ ໃນອະດີດອັນຍາວນານ ເຮົາໄດ້ມີວິນຍານແນວນີ້ມາແລ້ວ ບຸກຄົນຈຶ່ງຊື່ວ່າ ທຳຄວາມມຸ້ງ ຫວັງ (ກາມ) ໃນການກ່ອນ ເປັນແນວນີ້

ອີກໄນໜຶ່ງ ບຸກຄົນມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະໃນອາລົມນັ້ນວ່າ ໃນອະດີດອັນ ຍາວນານ ເຮົາໄດ້ມີຕາແນວນີ້ ໄດ້ເຫັນຮູບແນວນີ້ ຍ້ອນມີວິນຍານກ່ຽວເນື່ອງດ້ວຍ ສັນທະຣາຄະ ເຂົາຈຶ່ງເພີດເພີນກັບອາລົມນັ້ນ ເມື່ອເພີດເພີນກັບອາລົມນັ້ນ ບຸກຄົນຈຶ່ງ ຊື່ວ່າ ທຳຄວາມມຸ້ງຫວັງ (ກາມ)

ໃນການກ່ອນ ແນວນີ້ແດ່ ຯລຯ ໄດ້ມີຫູແນວນີ້ ໄດ້ຍິນສຽງແນວນີ້ ຯລຯ ໄດ້ມີດັງແນວ ນີ້ ໄດ້ກິ່ນແນວນີ້ ຯລຯ ໄດ້ມີລີ້ນແນວນີ້ ໄດ້ຮູ້ຣົດແນວນີ້ ຯລຯ ໄດ້ມີກາຍແນວນີ້ ຮູ້ສຶກຜັດສະ ແນວນີ້ ຯລຯ ມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະໃນອາລົມນັ້ນວ່າ ໃນອະດີດອັນຍາວນານ ເຮົາໄດ້ມີໃຈແນວນີ້ ຮູ້ທຳມາຣົມແນວນີ້ ຍ້ອນມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະ ເຂົາຈຶ່ງ ເພີດເພີນກັບອາລົມນັ້ນ ເມື່ອເພີດເພີນກັບອາລົມນັ້ນ ບຸກຄົນຈຶ່ງຊື່ວ່າ ທຳຄວາມມຸ້ງຫວັງ (ກາມ) ໃນການກ່ອນ ເປັນແນວນີ້

ອີກໄນໜຶ່ງ ບຸກຄົນຍິນດີ ມຸ້ງຫວັງ ເຖິງຄວາມພໍໃຈ ດ້ວຍການຫົວ ໂອ້ລົມ ຫຼິ້ນຫົວ ກັບ ມາຕຸຄາມໃນການກ່ອນ ບຸກຄົນຈຶ່ງຊື່ວ່າ ທຳຄວາມມຸ້ງຫວັງ (ກາມ) ໃນການກ່ອນ ເປັນແນວນີ້

ບຸກຄົນທຳຄວາມມຸ້ງຫວັງ (ກາມ) ໃນການພາຍຫຼັງແນວໃດ?

ຄື ບຸກຄົນຕາມຣະນຶກເຖິງຄວາມເພີດເພີນໃນອາລົມນັ້ນວ່າ ໃນອະນາຄົດອັນຍາວ ນານ ເຮົາເພິ່ງມີຮູບແນວນີ້ ຯລຯ ເພິ່ງມີເວທະນາແນວນີ້ ຯລຯ ເພິ່ງມີສັນຍາແນວນີ້ ຯລຯ ເພິ່ງມີສັງ ຂານແນວນີ້ ບຸກຄົນຕາມຣະນຶກເຖິງຄວາມເພີດເພີນໃນອາລົມນັ້ນວ່າ ໃນອະນາຄົດອັນຍາວນານ ເຮົາເພິ່ງມີວິນຍານແນວນີ້ ບຸກຄົນຈຶ່ງຊື່ວ່າ ທຳຄວາມມຸ້ງຫວັງ (ກາມ) ໃນການພາຍຫຼັງ ເປັນ ແນວນີ້

ອີກໄນໜຶ່ງ ບຸກຄົນຕັ້ງຈິດເພື່ອໃຫ້ໄດ້ອາລົມທີ່ຍັງບໍ່ໄດ້ວ່າ ໃນອະນາຄົດອັນຍາວນານຂໍ ເຮົາເພິ່ງມີຕາແນວນີ້ ເຫັນຮູບແນວນີ້ ຍ້ອນມີການຕັ້ງຈິດເປັນປັດໄຈ ເຂົາຈຶ່ງເພີດເພີນກັບອາລົມ ນັ້ນ ເມື່ອເພີດເພີນກັບອາລົມນັ້ນ ບຸກຄົນຈຶ່ງຊື່ວ່າ ທຳຄວາມມຸ້ງຫວັງ (ກາມ) ໃນການພາຍຫຼັງ ແນວນີ້ແດ່ ຯລຯ ເພິ່ງມີຫູແນວນີ້ ໄດ້ຍິນສຽງແນວນີ້ ຯລຯ ເພິ່ງມີດັງແນວນີ້ ໄດ້ກິ່ນແນວນີ້ ຯລຯ ເພິ່ງມີລີ້ນແນວນີ້ ຮູ້ຣົດແນວນີ້ ຯລຯ ເພິ່ງມີກາຍແນວນີ້ ຮູ້ສຶກ ຜັດສະແນວນີ້ ຯລຯ ບຸກ ຄົນຕັ້ງຈິດເພື່ອໃຫ້ໄດ້ອາລົມທີ່ຍັງບໍ່ໄດ້ວ່າ ໃນອະນາຄົດອັນຍາວນານ ຂໍເຮົາເພິ່ງມີໃຈແນວນີ້ ຮູ້ ທຳມາຣົມແນວນີ້ ຍ້ອນມີການຕັ້ງຈິດເປັນປັດໄຈ ເຂົາຈຶ່ງເພີດເພີນກັບອາລົມນັ້ນ ເມື່ອເພີດເພີນ ກັບອາລົມນັ້ນ ບຸກຄົນຈຶ່ງຊື່ວ່າ ທຳຄວາມ ມຸ້ງຫວັງ (ກາມ) ໃນການພາຍຫຼັງ ເປັນແນວນີ້

ອີກໄນໜຶ່ງ ບຸກຄົນຕັ້ງຈິດເພື່ອໃຫ້ໄດ້ອາລົມທີ່ຍັງບໍ່ໄດ້ວ່າ ດ້ວຍສິນ ພົດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທວະດາ ຫຼື ເທບອົງໃດອົງໜຶ່ງ ຍ້ອນການຕັ້ງຈິດເປັນປັດໄຈ ເຂົາຈຶ່ງເພີດເພີນກັບອາລົມນັ້ນ ເມື່ອເພີດເພີນກັບອາລົມນັ້ນ ບຸກຄົນຈຶ່ງຊື່ວ່າທຳຄວາມມຸ້ງຫວັງ(ກາມ) ໃນການພາຍຫຼັງ ເປັນແນວນີ້ ລວມຄວາມວ່າ ມຸ້ງຫວັງ (ກາມ) ໃນການພາຍຫຼັງ ຫຼືໃນການກ່ອນ

ຄຳວ່າ (ປາຖະໜາ) ກາມເຫຼົ່ານີ້ ໃນຄຳວ່າ ປາຖະໜາກາມເຫຼົ່ານີ້ ແລະກາມທີ່ມີຢູ່ກ່ອນ ໄດ້ແກ່ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ກາມມະຄຸນ ໕ ທີ່ເປັນ ປັດຈຸບັນ

ຄຳວ່າ ປາຖະໜາກາມທີ່ມີຢູ່ກ່ອນ ໄດ້ແກ່ ປາຖະໜາ ຄື ຄອນຫາ ພ່ຳຫາ ກາມມະຄຸນ ໕ ທີ່ເປັນອະດີດ ລວມຄວາມວ່າ ປາຖະໜາກາມເຫຼົ່ານີ້ ແລະກາມທີ່ມີຢູ່ກ່ອນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສັດເຫຼົ່ານັ້ນ ມີຄວາມປາຖະໜາເປັນຕົ້ນເຫດ
ຕິດພັນຢູ່ກັບຄວາມພໍໃຈໃນພົບ
ມຸ້ງຫວັງ (ກາມ) ໃນການພາຍຫຼັງ ຫຼືໃນການກ່ອນ
ປາຖະໜາກາມເຫຼົ່ານີ້ແລະກາມທີ່ມີຢູ່ກ່ອນ
ຍ່ອມເປັນຜູ້ຫຼຸດພົ້ນໄດ້ຍາກ (ແລະ) ເຮັດໃຫ້ຜູ້ອື່ນຫຼຸດພົ້ນບໍ່ໄດ້ເລີຍ

[໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສັດເຫຼົ່ານັ້ນ ຍິນດີ ຂວນຂວາຍ ລຸ້ມຫຼົງໃນກາມທັງຫຼາຍ
ເປັນຜູ້ຕົກຕ່ຳ ຕັ້ງຢູ່ໃນກຳທີ່ຜິດ ປະສົບທຸກແລ້ວ
ຈຶ່ງຮ່ຳໄຮຢູ່ວ່າ ເຮົາຈຸຕິຈາກພົບນີ້ແລ້ວ ຈັກເປັນອັນໃດນໍ

## ວ່າດ້ວຍກາມ ໒ ຢ່າງ

ຄຳວ່າ ຍິນດີ ຂວນຂວາຍ ລຸ້ມຫຼົງໃນກາມທັງຫຼາຍ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຕັນຫາຕັດຮຽກວ່າ ຄວາມຍິນດີ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ ສັດທັງຫຼາຍ ກຳໜັດ ຍິນດີ ຄື ຕິດໃຈ ສະຍົບ ມົກມຸ້ນ ເກາະຕິດ ກ່ຽວພັນ ພົວພັນໃນວັດຖຸກາມດ້ວຍກິເລດກາມ ລວມຄວາມວ່າ ຍິນດີໃນກາມທັງຫຼາຍ

ຄຳວ່າ ຂວນຂວາຍ ອະທິບາຍວ່າ ແມ່ນສັດຜູ້ສະແຫວງຫາ ເສາະຫາ ຄົ້ນຫາກາມທັງຫຼາຍ ທ່ຽວໄປເພື່ອກາມນັ້ນ ຫຼາຍໄປດ້ວຍກາມນັ້ນ ໜັກໃນກາມນັ້ນ ເອນໄປໃນກາມນັ້ນ ໂອນໄປ ໃນກາມນັ້ນ ໂນ້ມໄປໃນກາມນັ້ນ ນ້ອມໃຈໄປໃນກາມນັ້ນ ມຸ້ງກາມນັ້ນເປັນໃຫຍ່ ຊື່ວ່າຜູ້ຂວນຂວາຍໃນກາມ

ແມ່ນສັດຜູ້ສະແຫວງຫາ ເສາະຫາ ຄົ້ນຫາ ຮູບດ້ວຍອຳນາດຕັນຫາ ໗ລ໗ ສຽງ ໗ລ໗ ກິ່ນ ໗ລ໗ ຣົດ ໗ລ໗ ຜູ້ສະແຫວງຫາ ເສາະຫາ ຄົ້ນຫາໂຜດຖັບພະດ້ວຍອຳນາດຕັນຫາ ທ່ຽວໄປເພື່ອການນັ້ນ ຫຼາຍໄປດ້ວຍການນັ້ນ ໜັກໃນການນັ້ນ ເອນໄປໃນການນັ້ນ ໂອນໄປໃນການນັ້ນ ໂນ້ມໄປໃນການນັ້ນ ນ້ອມໃຈໄປໃນການນັ້ນ ມຸ້ງການນັ້ນເປັນໃຫຍ່ ຊື່ວ່າຜູ້ຂວນຂວາຍໃນການ

ແມ່ນສັດຜູ້ໄດ້ສະເພາະຮູບດ້ວຍອຳນາດຕັນຫາ ໗ລ໗ ສຽງ ໗ລ໗ ກິ່ນ ໗ລ໗ ຣົດ ໗ລ໗ ຜູ້ໄດ້ສະເພາະ ໂຜດຖັບພະດ້ວຍອຳນາດຕັນຫາ ທ່ຽວໄປເພື່ອການນັ້ນ ຫຼາຍໄປດ້ວຍການນັ້ນ ໜັກໃນ ການນັ້ນ ເອນໄປໃນການນັ້ນ ໂອນໄປໃນການນັ້ນ ໂນ້ມໄປໃນການນັ້ນ ນ້ອມໃຈໄປໃນການນັ້ນ ມຸ້ງການນັ້ນເປັນໃຫຍ່ ຊື່ວ່າຜູ້ຂວນຂວາຍໃນການ

ແມ່ນສັດຜູ້ບໍຣິໂພກຮູບດ້ວຍອຳນາດຕັນຫາ ໗ລ໗ ສຽງ ໗ລ໗ ກິ່ນ ໗ລ໗ ຣົດ ໗ລ໗ ຜູ້ບໍຣິໂພກ ໂຜດຖັບພະດ້ວຍອຳນາດຕັນຫາ ທ່ຽວໄປເພື່ອການນັ້ນ ຫຼາຍໄປດ້ວຍການນັ້ນ ໜັກໃນການນັ້ນ ເອນໄປໃນການນັ້ນ ໂອນໄປໃນການນັ້ນ ໂນ້ມໄປໃນການນັ້ນ ນ້ອມໃຈໄປໃນການນັ້ນ ມຸ້ງການນັ້ນເປັນໃຫຍ່ ຊື່ວ່າຜູ້ຂວນຂວາຍໃນການ

ປຽບເໝືອນສັດຜູ້ກໍ່ການຜິດຖຽງ ຊື່ວ່າ ຜູ້ຂວນຂວາຍໃນການຜິດຖຽງ ຜູ້ເຮັດວຽກງານ ຊື່ວ່າຜູ້ຂວນຂວາຍໃນການເຮັດວຽກງານ ຜູ້ທ່ຽວໄປໃນໂຄຈອນ ຊື່ວ່າຜູ້ຂວນຂວາຍໃນໂຄຈອນ໑ ຜູ້ຈະເລີນຊານ ຊື່ວ່າຜູ້ຂວນຂວາຍໃນຊານ ສັນໃດ ແມ່ນສັດຜູ້ສະແຫວງຫາ ເສາະຫາ ຄົ້ນຫາການທັງຫຼາຍ ທ່ຽວໄປເພື່ອການນັ້ນ ຫຼາຍໄປດ້ວຍການນັ້ນ ໜັກໃນການນັ້ນ ເອນໄປໃນການນັ້ນ ໂອນໄປໃນການນັ້ນ ໂນ້ມໄປໃນການນັ້ນ ນ້ອມໃຈໄປໃນການນັ້ນ ມຸ້ງການນັ້ນເປັນໃຫຍ່ ຊື່ວ່າ ຜູ້ຂວນຂວາຍໃນການ

ແມ່ນສັດຜູ້ບໍຣິໂພກຮູບດ້ວຍອຳນາດຕັນຫາ ໗ລ໗ ສຽງ ໗ລ໗ ກິ່ນ ໗ລ໗ ຣົດ ໗ລ໗ ຜູ້ບໍຣິໂພກ ໂຜດຖັບພະດ້ວຍອຳນາດຕັນຫາ ທ່ຽວໄປເພື່ອການນັ້ນ ຫຼາຍໄປດ້ວຍການນັ້ນ ໜັກໃນການນັ້ນ ເອນໄປໃນການນັ້ນ ໂອນໄປໃນການນັ້ນ ໂນ້ມໄປໃນການນັ້ນ ນ້ອມໃຈໄປໃນການນັ້ນ ມຸ້ງການນັ້ນເປັນໃຫຍ່ ຊື່ວ່າຜູ້ຂວນຂວາຍໃນການ ສັນນັ້ນຄືກັນ

ຄຳວ່າ ລຸ້ມຫຼົງ ອະທິບາຍວ່າ ສ່ວນຫຼາຍເທວະດາ ແລະມະນຸດທັງຫຼາຍ ຍ່ອມຫຼົງ ລຸ້ມຫຼົງ ຫຼົງງົມງວາຍໃນການມະຄຸນ ໕ ເທວະດາແລະມະນຸດເຫຼົ່ານັ້ນ ຈຶ່ງຊື່ວ່າເປັນຜູ້ຫຼົງ ລຸ້ມຫຼົງ ຫຼົງງົມງວາຍ ຄືຖືກອະວິດຊາເຮັດໃຫ້ມືດບອດ ຫຸ້ມຫໍ່ ໂອບລ້ອມ ຫ້ອມລ້ອມ ຄອບຄຸມ ປົກຄຸມ ປົດບັງໄວ້ ລວມຄວາມວ່າ ຍິນດີ ຂວນຂວາຍ ລຸ້ມຫຼົງໃນການທັງຫຼາຍ

ຄຳວ່າ ຜູ້ຕົກຕ່ຳ ໃນຄຳວ່າ ເປັນຜູ້ຕົກຕ່ຳ ຕັ້ງຢູ່ໃນກຳທີ່ຜິດ ອະທິບາຍວ່າ ແມ່ນຜູ້ໄປຕ່ຳ ກໍຊື່ວ່າຜູ້ຕົກຕ່ຳ ແມ່ນຜູ້ຂີ້ຖີ່ກໍຕັດຮຽກວ່າ ຜູ້ຕົກຕ່ຳ ຜູ້ບໍ່ເອື້ອເຟື້ອຄຳ ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຂອງພຣະພຸດທະເຈົ້າ ແລະສາວົກຂອງພຣະພຸດທະເຈົ້າ ກໍຊື່ວ່າຜູ້ຕົກຕ່ຳ

ຜູ້ໄປຕ່ຳແນວໃດ ຈຶ່ງຊື່ວ່າຜູ້ຕົກຕ່ຳ ຜູ້ໄປຕ່ຳ ອະທິບາຍວ່າ ໄປສູ່ນະຮົກ ໄປສູ່ກຳເນີດເດຍຣັດສານ ໄປສູ່ເຜດວິໄສ ລວມຄວາມວ່າ ຜູ້ໄປຕ່ຳແນວນີ້ ຊື່ວ່າຜູ້ຕົກຕ່ຳ

## ວ່າດ້ວຍຄວາມຂີ້ຖີ່ ໕ ຢ່າງ

ຜູ້ຂີ້ຖີ່ແນວໃດ ຈຶ່ງຕັດຮຽກວ່າຜູ້ຕົກຕ່ຳ ມັດສະຣິຍະ ມີ ໕ ຢ່າງ ຄື

໑. ອາວາສະມັດສະຣິຍະ (ຄວາມຂີ້ຖີ່ທີ່ຢູ່)
໒. ກຸລະມັດສະຣິຍະ (ຄວາມຂີ້ຖີ່ຕະກູນ)
໓. ລາບະມັດສະຣິຍະ (ຄວາມຂີ້ຖີ່ລາບ)
໔. ວັນນະມັດສະຣິຍະ (ຄວາມຂີ້ຖີ່ວັນນະ)
໕. ທຳມະມັດສະຣິຍະ (ຄວາມຂີ້ຖີ່ທຳ)

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມເຫັນແກ່ໄດ້ ຄວາມຖີ່ໜຽວ ຄວາມທີ່ຈິດເຈັບຮ້ອນ (ໃນການໃຫ້) ຄວາມມີຈິດຫວງແຫນເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຂີ້ຖີ່

ອີກໄນໜຶ່ງ ຄວາມຂີ້ຖີ່ຂັນກໍດີ ຄວາມຂີ້ຖີ່ທາດກໍດີ ຄວາມຂີ້ຖີ່ອາຍະຕະນະກໍດີ ຄວາມມຸ້ງແຕ່ຈະໄດ້ກໍດີ ຮຽກວ່າ ຄວາມຂີ້ຖີ່ ຊົນທັງຫຼາຍຜູ້ປະກອບດ້ວຍຄວາມຂີ້ຖີ່ນີ້ ຄື ຄວາມເປັນຜູ້ບໍ່ຮູ້ຈັກຄຳເວົ້າຂອງຍາຈົກ ເປັນຜູ້ຜະໝາດ ຜູ້ຂີ້ຖີ່ແນວນີ້ ຕັດຮຽກວ່າ ຜູ້ຕົກຕ່ຳ

ຜູ້ບໍ່ເອື້ອເຟື້ອພຣະດຳຣັດ ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນຂອງພຣະພຸດທະເຈົ້າ ແລະສາວົກຂອງພຣະພຸດທະເຈົ້າແນວໃດ ຈຶ່ງຊື່ວ່າຜູ້ຕົກຕ່ຳ ຜູ້ບໍ່ເອື້ອເຟື້ອ ບໍ່ຍອມຟັງ ບໍ່ງຽງໂສດສະດັບ ບໍ່ຕັ້ງໃຈເພື່ອໃຫ້ຮູ້ພຣະດຳຣັດ ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນຂອງພຣະພຸດທະເຈົ້າ ແລະສາວົກຂອງພຣະພຸດທະເຈົ້າ ເປັນຜູ້ບໍ່ເຊື່ອຟັງ ບໍ່ເຮັດຕາມຄຳ ປະພຶດຝ່າຝືນເບືອນໜ້າໄປທາງອື່ນ ຜູ້ບໍ່ເອື້ອເຟື້ອພຣະດຳຣັດ ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນຂອງພຣະພຸດທະເຈົ້າ ແລະສາວົກຂອງພຣະພຸດທະເຈົ້າ ຢ່າງນີ້ຊື່ວ່າຜູ້ຕົກຕ່ຳ ລວມຄວາມວ່າ ເປັນຜູ້ຕົກຕ່ຳ

ຄຳວ່າ ສັດເຫຼົ່ານັ້ນ ຯລຯ ຕັ້ງຢູ່ໃນກຳທີ່ຜິດ ອະທິບາຍວ່າ ຕັ້ງຢູ່ ຄື ຕັ້ງໝັ້ນ ຕັ້ງສະເພາະຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອ ເກາະຕິດ ກ່ຽວພັນ ພົວພັນໃນກາຍຍະກຳ

ວະຈີກຳ ມະໂນກຳທີ່ຜິດ ປານາຕິບາດ (ການຂ້າສັດ) ອະທິນນາທານ (ການລັກຊັບ) ກາເມສຸມິດສາຈາຣະ (ການປະພຶດຜິດໃນການ) ມຸສາວາທະ (ການເວົ້າຕົວະ) ປິສຸນາວາຈາ (ວາຈາສໍ່ສຽດ) ຜະຣຸສະວາຈາ (ວາຈາຫຍາບ) ສຳຜັບປະລາປະ (ຄຳເວົ້າເພີ້ເຈີ້) ອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ) ພະຍາບາດ (ຄວາມຄິດປອງຮ້າຍ) ມິດສາທິດຖິ(ຄວາມເຫັນຜິດຈາກທຳນອງຄອງທຳ) ສັງຂານທັງຫຼາຍ ການມະຄຸນ ໕ ນິວອນ ໕ ( ຯລຯ ໃນເຈຕະນາ ຯລຯ ໃນ

ຄວາມປາຖະໜາ ຯລຯ ໃນຄວາມຕັ້ງໃຈທີ່ຜິດ) ລວມຄວາມວ່າ ສັດເຫຼົ່ານັ້ນ ຯລຯ ເປັນຜູ້ຕົກຕ່ຳ ຕັ້ງຢູ່ໃນກຳທີ່ຜິດ

ຄຳວ່າ ປະສົບທຸກແລ້ວ ໃນຄຳວ່າ ປະສົບທຸກແລ້ວ ຈຶ່ງຮ່ຳໄຮຢູ່ ໄດ້ແກ່ ປະສົບທຸກແລ້ວ ຄື ເຖິງທຸກ ພົບພໍ້ກັບທຸກ ເຂົ້າເຖິງທຸກແລ້ວ ເຖິງມານ ພົບພໍ້ກັບມານ ເຂົ້າເຖິງມານແລ້ວ ເຖິງມໍຣະນະ ພົບພໍ້ກັບມໍຣະນະ ເຂົ້າເຖິງມໍຣະນະແລ້ວ ລວມຄວາມວ່າ ປະສົບທຸກແລ້ວ

ຄຳວ່າ ຄ່ຳຄວນຢູ່ ໄດ້ແກ່ ຮ່ຳໄຮ ລຳພັນ ເສົ້າໂສກ ລຳບາກໃຈ ຄ່ຳຄວນ ຕີເອິກພ່ຳເພີ້ ເຖິງຄວາມຫຼົງໃຫຼ ລວມຄວາມວ່າ ປະສົບທຸກແລ້ວ ຈຶ່ງຮ່ຳໄຮຢູ່

ຄຳວ່າ ເຮົາຈຸຕິຈາກພົບນີ້ ຈັກເປັນອັນໃດນໍ ອະທິບາຍວ່າ ເຮົາຈຸຕິຈາກພົບນີ້ແລ້ວ ຈັກເປັນອັນໃດນໍ ຄື ຈັກເປັນສັດນະຮົກ ເກີດໃນກຳເນີດສັດເດຍຣັດສານ ເກີດໃນເຜດວິໄສ ເປັນມະນຸດ ເປັນເທວະດາ ມີຮູບ ບໍ່ມີຮູບ ມີສັນຍາ ບໍ່ມີສັນຍາ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ແລ່ນໄປສູ່ຄວາມສົງໄສ ແລ່ນໄປຫາຄວາມເຄືອບແຄງ ເກີດຄວາມບໍ່ແນ່ໃຈ ຍ່ອມຮ່ຳໄຮ ລຳພັນ ເສົ້າໂສກ ລຳບາກໃຈ ຄ່ຳຄວນ ຕີເອິກພ່ຳເພີ້ ເຖິງຄວາມຫຼົງໃຫຼວ່າ ໃນອະນາຄົດອັນຍາວນານ ເຮົາຈັກມີຫຼືຈັກບໍ່ມີ ໃນອະນາຄົດອັນຍາວນານ ເຮົາຈັກເປັນອັນໃດ ຫຼືຈັກ ເປັນແນວໃດ? ຫຼືໃນອະນາຄົດອັນຍາວນານ ເຮົາເປັນອັນໃດແລ້ວ ຈັກເປັນອັນໃດອີກ ລວມຄວາມວ່າ ເຮົາຈຸຕິຈາກພົບນີ້ຈັກເປັນອັນໃດນໍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງ ຕັດວ່າ

ສັດເຫຼົ່ານັ້ນ ຍິນດີ ຂວນຂວາຍ ລຸ້ມຫຼົງໃນກາມທັງຫຼາຍ
ເປັນຜູ້ຕົກຕ່ຳ ຕັ້ງຢູ່ໃນກຳທີ່ຜິດ ປະສົບທຸກແລ້ວ
ຈຶ່ງຮ່ຳໄຮຢູ່ວ່າ ເຮົາຈຸຕິຈາກພົບນີ້ ຈັກເປັນອັນໃດນໍ

[໑໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍ້ອນເຫດນັ້ນ ສັດທີ່ເກີດແລ້ວເພິ່ງສຶກສາໃນທີ່ນີ້
ເພິ່ງຮູ້ຈັກກຳແນວໃດແນວໜຶ່ງໃນໂລກວ່າ ເປັນກຳທີ່ຜິດ
ບໍ່ເພິ່ງປະພຶດຜິດ ຍ້ອນເຫດແຫ່ງກຳທີ່ຜິດນັ້ນ
ນັກປາດກ່າວວ່າ ຊີວິດນີ້ເປັນຂອງໜ້ອຍ

## ວ່າດ້ວຍສິກຂາ ໑

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ສັດທີ່ເກີດແລ້ວເພິ່ງສຶກສາໃນທີ່ນີ້ໄດ້ແກ່ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ເມື່ອເຫັນໂທດນັ້ນໃນກາມທັງຫຼາຍ ລວມຄວາມວ່າ ຍ້ອນເຫດນັ້ນ

ຄຳວ່າ ເພິ່ງສຶກສາ ໄດ້ແກ່ ສິກຂາ ໓ ຄື

໑. ອະທິສີລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ອະທິສີລະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ສົມບູນດ້ວຍອາຈາຣະ ແລະໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍຢູ່ ຄື ສີນຂັນນ້ອຍ ສີນຂັນໃຫຍ່ ສີລເປັນທີ່ເພິ່ງ ເປັນເບື້ອງຕົ້ນ ເປັນຄວາມປະພຶດ ເປັນຄວາມສັງລວມ ເປັນຄວາມຣະວັງ ເປັນຫົວໜ້າ ເປັນປະທານ ເພື່ອຄວາມເຖິງພ້ອມແຫ່ງທຳທີ່ເປັນກຸສົນ ນີ້ຊື່ວ່າ ອະທິສີລະສິກຂາ

ອະທິຈິດຕະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກ ອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີ ວິຈານມີແຕ່ປີຕິແລະສຸກທີ່ເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຍ້ອນລະສຸກແລະທຸກໄດ້ແລ້ວ ຍ້ອນໂສມະນັດແລະໂທມະນັດ ດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຊື່ວ່າອະທິຈິດຕະສິກຂາ

ອະທິປັນຍາສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາອັນປະເສີດ ຢັ່ງເຖິງຄວາມເກີດແລະຄວາມດັບ ເພິກຖອນກິເລດ ໃຫ້ບັນລຸເຖິງຄວາມສິ້ນທຸກໂດຍຊອບ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດເຄື່ອງດຳເນີນໄປສູ່ຄວາມດັບທຸກ) ທ່ານຮູ້ຕາມຄວາມເປັນຈິງວ່າ ເຫຼົ່ານີ້ອາສະວະ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ອາສະວະສະມຸໄທ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ອາສະວະນິໂຣດ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ອາສະວະນິໂຣທະຄາມິນີປະຕິປະທາ ນີ້ຊື່ວ່າອະທິປັນຍາສິກຂາ

ສິກຂາ ໓ ເຫຼົ່ານີ້ ເມື່ອສັດເກີດນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຊື່ວ່າເພິ່ງສຶກສາ ເມື່ອເຫັນ ຊື່ວ່າເພິ່ງສຶກສາ ເມື່ອພິຈາລະນາ ຊື່ວ່າເພິ່ງສຶກສາ ເມື່ອອະທິຖານຈິດ ຊື່ວ່າ ເພິ່ງສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າເພິ່ງສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າ ເພິ່ງສຶກສາ ເມື່ອຕັ້ງສະຕິ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງໃຈໝັ້ນ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າເພິ່ງສຶກສາ ເມື່ອກຳນົດຮູ້ທຳທີ່ຄວນ ກຳນົດຮູ້ ຊື່ວ່າເພິ່ງສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າເພິ່ງສຶກສາ ເມື່ອຈະເລີນທຳ ທີ່ຄວນຈະເລີນ ຊື່ວ່າເພິ່ງສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ

ຄຳວ່າ ໃນທີ່ນີ້ ໄດ້ແກ່ ໃນຄວາມເຫັນນີ້ ຄວາມຖືກໃຈນີ້ ຄວາມພໍໃຈນີ້ ຄວາມຍຶດຖືນີ້ ທຳນີ້ ວິໄນນີ້ ທຳວິໄນນີ້ ປາພົດນີ້ ພົມມະຈັນນີ້ ສັດຖຸສາດນີ້ ອັດຕະພາບນີ້ ມະນຸດໂລກນີ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ໃນທີ່ນີ້

ຄຳວ່າ ສັດທີ່ເກີດແລ້ວ ໄດ້ແກ່ ສັດ ຄື ນໍຣະຊົນ ຯລຯ ມະນຸດ ລວມຄວາມວ່າ ຍ້ອນເຫດນັ້ນ ສັດທີ່ເກີດແລ້ວເພິ່ງສຶກສາໃນທີ່ນີ້

ຄຳວ່າ ແນວໃດແນວໜຶ່ງ ໃນຄຳວ່າ ເພິ່ງຮູ້ຈັກກຳແນວໃດແນວໜຶ່ງໃນໂລກວ່າ ເປັນກຳທີ່ຜິດ ໄດ້ແກ່ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອ ໂດຍປະການທັງປວງ ຄຳວ່າ ແນວໃດແນວໜຶ່ງ ນີ້ ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ເພິ່ງຮູ້ຈັກ ຯລຯ ວ່າ ເປັນກຳທີ່ຜິດ ອະທິບາຍວ່າ ເພິ່ງຮູ້ ຄື ເພິ່ງຮູ້ທົ່ວ ຮູ້ແຈ້ງຄັກ ຮູ້ສະເພາະ ແທງຕະຫຼອດກາຍຍະກຳ ວະຈີກຳ ມະໂນກຳທີ່ຜິດ ປານາຕິບາດ ອະທິນນາທານກາເມສຸມິດສາຈາຣະ ມຸສາວາທະ ປິສຸນາວາຈາ ຜະຣຸສະວາຈາ ສຳຜັບປະລາປະ ອະພິດຊາ ພະຍາບາດ ມິດສາທິດຖິ ສັງຂານທັງຫຼາຍ ກາມມະຄຸນ ໕ ນິວອນ ໕ ເຈຕະນາ ຄວາມປາ ຖະໜາ ຄວາມຕັ້ງໃຈທີ່ຜິດວ່າເປັນກຳທີ່ຜິດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ ລວມຄວາມວ່າ ເພິ່ງຮູ້ຈັກກຳ ແນວໃດແນວໜຶ່ງໃນໂລກວ່າ ເປັນກຳທີ່ຜິດ

ຄຳວ່າ ບໍ່ເພິ່ງປະພຶດຜິດ ຍ້ອນເຫດແຫ່ງກຳທີ່ຜິດນັ້ນ ອະທິບາຍວ່າ ບໍ່ເພິ່ງປະພຶດ ຄື ບໍ່ເພິ່ງປະພຶດເອື້ອເຟື້ອ ບໍ່ເພິ່ງປະພຶດເອື້ອເຟື້ອໂດຍຊອບ ບໍ່ເພິ່ງສະມາທານປະພຶດຜິດ ຍ້ອນເຫດແຫ່ງກາຍຍະກຳ ວະຈີກຳ ມະໂນກຳ ປານາຕິບາດ ອະທິນນາທານ ກາເມສຸມິດສາຈາຣະ ມຸສາວາທະ ປິສຸນາວາຈາ ຜະຣຸສະວາຈາ ສຳຜັບປະລາປະ ອະພິດຊາ ພະຍາບາດ ມິດສາທິດຖິ ສັງຂານທັງຫຼາຍ ກາມມະຄຸນ ໕ ນິວອນ ໕ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈທີ່ຜິດ ລວມຄວາມວ່າ ບໍ່ເພິ່ງປະພຶດຜິດ ຍ້ອນເຫດແຫ່ງ ກຳທີ່ຜິດນັ້ນ

## ວ່າດ້ວຍຊີວິດເປັນຂອງໜ້ອຍດ້ວຍເຫດ ໔ ປະການ

ຄຳວ່າ ຊີວິດ ໃນຄຳວ່າ ນັກປາດກ່າວວ່າ ຊີວິດນີ້ເປັນຂອງໜ້ອຍ ໄດ້ແກ່ ອາຍຸ ຄວາມດຳຣົງຢູ່ ຄວາມດຳເນີນໄປ ຄວາມໃຫ້ຊີວິດດຳເນີນໄປ ຄວາມເຄື່ອນໄຫວ ຄວາມເປັນໄປ ຄວາມຮັກສາ ຄວາມເປັນຢູ່ ຊີວິຕິນຊີ ອັນໜຶ່ງ ຊີວິດເປັນຂອງໜ້ອຍ ດ້ວຍເຫດ ໔ ປະການ ຄື (໑) ຊີວິດເປັນຂອງໜ້ອຍຍ້ອນດຳຣົງຢູ່ຊົ່ວເວລາພຽງເລັກໜ້ອຍ (໔) ຊີວິດເປັນຂອງໜ້ອຍ ຍ້ອນມີຄຸນຄ່າພຽງເລັກໜ້ອຍ

ຊີວິດເປັນຂອງໜ້ອຍ ຍ້ອນດຳຣົງຢູ່ຊົ່ວເວລາພຽງເລັກໜ້ອຍ ເປັນແນວໃດ?

ຄື ໃນຂະນະຈິດທີ່ເປັນອະດີດ ຊີວິດເປັນຢູ່ແລ້ວ ບໍ່ແມ່ນກຳລັງເປັນຢູ່ ບໍ່ແມ່ນຈັກເປັນຢູ່ ໃນຂະນະຈິດທີ່ເປັນອະນາຄົດ ຊີວິດຈັກເປັນຢູ່ ບໍ່ແມ່ນກຳລັງເປັນຢູ່ ບໍ່ແມ່ນເປັນຢູ່ແລ້ວ ໃນຂະນະຈິດທີ່ເປັນປັດຈຸບັນ ຊີວິດກຳລັງເປັນຢູ່ ບໍ່ແມ່ນເປັນຢູ່ແລ້ວ ບໍ່ແມ່ນຈັກເປັນຢູ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຊີວິດ ອັດຕະພາບ ສຸກແລະທຸກທັງປວງ
ເປັນທຳທີ່ປະກອບກັນຂຶ້ນຊົ່ວຂະນະຈິດດຽວ
ຂະນະຍ່ອມໝຸນໄປຢ່າງວ່ອງໄວ
ເທວະດາຜູ້ດຳຣົງຢູ່ໄດ້ ໘໔,໐໐໐ ກັບ
ກໍບໍ່ໄດ້ປະກອບດ້ວຍຈິດ ໔ ດວງ (ໃນຂະນະຈິດດຽວ) ເປັນຢູ່ໄດ້
ຂັນເຫຼົ່າໃດຂອງສັດທີ່ຕາຍໄປ ຫຼື ຍັງດຳຣົງຢູ່ໃນໂລກນີ້ ດັບໄປແລ້ວ
ຂັນເຫຼົ່ານັ້ນທັງໝົດ ເປັນຢ່າງດຽວກັນ ດັບໄປແລ້ວກໍບໍ່ໄດ້ສືບຕໍ່ກັນ
ຂັນທີ່ແຕກໄປໃນອະດີດອັນຫາລຳດັບບໍ່ໄດ້
ແລະຂັນທີ່ຈະແຕກໄປໃນອະນາຄົດ
ມີລັກສະນະບໍ່ຕ່າງກັບຂັນທີ່ດັບໃນປັດຈຸບັນ
ສັດບໍ່ເກີດດ້ວຍອະນາຄົດຂັນ ຍ່ອມດຳຣົງຢູ່ດ້ວຍປັດຈຸບັນຂັນ
ຍ້ອນຈິດແຕກດັບໄປ ສັດໂລກຊື່ວ່າ ຕາຍແລ້ວ
ນີ້ເປັນປະຣະມັດຖະບັນຍັດ
ຍ້ອນມີອາຍະຕະນະ ๖ ເປັນປັດໄຈ
ຂັນທັງຫຼາຍທີ່ປ່ຽນໄປຕາມສັນທະ ຍ່ອມເປັນໄປບໍ່ຂາດສາຍ
ເໝືອນນ້ຳໄຫຼໄປຕາມບ່ອນລຸ່ມຕ່ຳ ສັນນັ້ນ
ຂັນທັງຫຼາຍເຖິງການຊົງຕົວຢູ່ບໍ່ໄດ້ແຕກໄປແລ້ວ
ກອງຂັນໃນອະນາຄົດກໍບໍ່ມີ ສ່ວນຂັນທີ່ເກີດແລ້ວໃນປັດຈຸບັນກໍດຳຣົງຢູ່
ເໝືອນເມັດຜັກກາດເທິງປາຍເຫຼັກແຫຼມ ສັນນັ້ນ

ຄວາມແຕກທຳລາຍແຫ່ງຂັນທັງຫຼາຍທີ່ເກີດຂຶ້ນເຫຼົ່ານັ້ນ
ຜາກົດຢູ່ຂ້າງໜ້າ
ຂັນທັງຫຼາຍທີ່ມີການແຕກເປັນທຳມະດາ ດຳຣົງຢູ່ ບໍ່ໄດ້ຮ່ວມກັບຂັນເກົ່າ
ຂັນທັງຫຼາຍມາໂດຍສະພາວະທີ່ບໍ່ຜາກົດ ແຕກທຳລາຍໄປແລ້ວ
ກໍໄປສູ່ສະພາວະທີ່ບໍ່ຜາກົດ ຍ່ອມເກີດຂຶ້ນແລະດັບໄປ
ເໝືອນສາຍຟ້າແມບໃນອາກາດ ສັນນັ້ນ

ຊີວິດຊື່ວ່າເປັນຂອງໜ້ອຍ ຍ້ອນດຳຣົງຢູ່ຊົ່ວເວລາພຽງເລັກໜ້ອຍ ເປັນແນວນີ້

ຊີວິດເປັນຂອງໜ້ອຍຍ້ອນມີຄຸນຄ່າພຽງເລັກໜ້ອຍ ເປັນແນວໃດ?

ຄື ຊີວິດກ່ຽວເນື່ອງດ້ວຍລົມຫັນໃຈເຂົ້າ ຊີວິດກ່ຽວເນື່ອງດ້ວຍລົມຫັນໃຈອອກ ຊີວິດກ່ຽວເນື່ອງດ້ວຍລົມຫັນໃຈເຂົ້າແລະລົມຫັນໃຈອອກ ຊີວິດກ່ຽວເນື່ອງດ້ວຍມະຫາພູຕະຮູບ ຊີວິດກ່ຽວເນື່ອງດ້ວຍອາຫານທີ່ກືນກິນ ຊີວິດກ່ຽວເນື່ອງດ້ວຍໄຟທາດ ຊີວິດກ່ຽວເນື່ອງດ້ວຍວິນຍານ ມູນເຫດ (ກະຣັດຊະກາຍ) ຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ບຸບພະເຫດ ຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ປັດໄຈທັງຫຼາຍມີອາລົມເປັນຕົ້ນມີກຳລັງໜ້ອຍ ແດນເກີດ(ຕັນຫາ) ມີກຳລັງໜ້ອຍ ທຳທີ່ເກີດຮ່ວມກັນ ຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ທຳທີ່ປະກອບກັນ (ອະຣູປະທຳ) ຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ທຳທີ່ເກີດພ້ອມ ກັນຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ກິເລດເຄື່ອງປະກອບ (ຕັນຫາ) ມີກຳລັງໜ້ອຍ

ສະພາວະທຳເຫຼົ່ານີ້ແຕ່ລະຢ່າງມີກຳລັງໜ້ອຍຕະຫຼອດເວລາ ສະພາວະທຳເຫຼົ່ານີ້ແຕ່ລະຢ່າງບໍ່ໝັ້ນຄົງ ສະພາວະທຳເຫຼົ່ານີ້ຕ່າງກໍເຮັດໃຫ້ສະພາວະທຳອື່ນຕົກລ່ວງລົງໄປ ຍ້ອນສະພາວະທຳເຫຼົ່ານີ້ຕ່າງກໍບໍ່ມີຄວາມຕ້ານທານ ສະພາວະທຳເຫຼົ່ານີ້ຕ່າງກໍບໍ່ດຳຣົງກັນ ແລະກັນໃຫ້ຢູ່ໄດ້ ແມ່ນສະພາວະທຳທີ່ເຮັດໃຫ້ທຳເຫຼົ່ານີ້ເກີດກໍບໍ່ມີ

ອັນໜຶ່ງ ທຳໃດ ໆ ກໍບໍ່ໄດ້ເສື່ອມໄປຍ້ອນທຳໃດ ໆ
ຍ້ອນຂັນເຫຼົ່ານີ້ ເພິ່ງເຖິງຄວາມແຕກດັບໄປໂດຍປະການທັງປວງ
ຂັນເຫຼົ່ານີ້ທີ່ເກີດຂຶ້ນຍ້ອນເຫດປັດໄຈກ່ອນ
ແມ່ນເຫດປັດໄຈທີ່ເກີດກ່ອນກໍແຕກດັບໄປແລ້ວໃນການກ່ອນ
ໃນການໃດ ໆ ຂັນທີ່ເກີດກ່ອນແລະທີ່ເກີດໃນພາຍຫຼັງ
ຈຶ່ງບໍ່ໄດ້ເຫັນກັນແລະກັນ

ຊີວິດຊື່ວ່າເປັນຂອງໜ້ອຍ ຍ້ອນມີຄຸນຄ່າພຽງເລັກໜ້ອຍ ເປັນແນວນີ້

ອັນໜຶ່ງ ຍ້ອນທຽບກັບຊີວິດຂອງເທວະດາຊັ້ນຈາຕຸມະຫາຣາດ ຊີວິດຂອງມະນຸດຈຶ່ງໜ້ອຍ ຄື ເລັກໜ້ອຍ ບໍ່ຫຼາຍ ຊົ່ວຂະນະ ທັນທີ ບຶດດຽວ ຕັ້ງຢູ່ບໍ່ດົນ ດຳຣົງຢູ່ ບໍ່ດົນ ຍ້ອນທຽບ

ກັບຊີວິດຂອງເທວະດາຊັ້ນຕາວະຕິງສາ ຯລຯ ເທວະດາຊັ້ນຍາມາ ຯລຯ ເທວະດາຊັ້ນດຸສິດ ຯລຯ ເທວະດາຊັ້ນນິມມານະຣະດີ ຯລຯ ເທວະດາຊັ້ນປະຣະນິມມິດະວະສະວັດດີ ຯລຯ ຍ້ອນທຽບຄຽງກັບຊີວິດຂອງເທວະດາຊັ້ນພົມກາຍິກາ ຊີວິດຂອງມະນຸດຈຶ່ງໜ້ອຍ ຄື ເລັກໜ້ອຍ ບໍ່ຫຼາຍ ຊົ່ວຂະນະ ທັນທີ ບຶດດຽວ ຕັ້ງຢູ່ບໍ່ດົນ ດຳຣົງຢູ່ບໍ່ດົນ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ອາຍຸຂອງມະນຸດໜ້ອຍ ຈຳຕ້ອງໄປສູ່ປະຣະໂລກ ຕ້ອງປະສົບກັບຄວາມຕາຍທີ່ເຂົ້າໃຈກັນຢູ່ ຄວນທຳກຸສົນ ປະພຶດພົມມະຈັນ ຜູ້ທີ່ເກີດມາແລ້ວຈະບໍ່ຕາຍບໍ່ມີ ພິກຂຸທັງຫຼາຍ ຜູ້ໃດມີຊີວິດຍືນຍາວ ຜູ້ນັ້ນກໍຢູ່ໄດ້ພຽງ ໑໐໐ ປີ ຫຼື ຢູ່ໄດ້ເກີນກວ່ານັ້ນກໍມີໜ້ອຍ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງຕັດຄາຖາປະພັນຕໍ່ໄປອີກວ່າ)

ມະນຸດມີອາຍຸໜ້ອຍ ບຸກຄົນຜູ້ສະຫຼາດເພິ່ງດູໝິ່ນຊີວິດທີ່ໜ້ອຍນັ້ນ
ເພິ່ງເລັ່ງປະພຶດທຳເໝືອນຄົນຖືກໄຟໄໝ້ຫົວ ສັນນັ້ນ
ຍ້ອນຄວາມຕາຍຈະບໍ່ມາເຖິງບໍ່ມີ
ວັນຄືນລ່ວງເລີຍຜ່ານໄປ ຊີວິດກໍໃກ້ໝົດສິ້ນໄປ
ອາຍຸຂອງສັດທັງຫຼາຍກໍໝົດສິ້ນໄປນຳ
ເໝືອນນ້ຳໃນແມ່ນ້ຳນ້ອຍຈະຕ້ອງແຫ້ງໄປ ສັນນັ້ນ

## ວ່າດ້ວຍປັນຍາທີ່ຮຽກວ່າທີ

ຄຳວ່າ ນັກປາດກ່າວວ່າ ຊີວິດນີ້ເປັນຂອງໜ້ອຍ ອະທິບາຍວ່າ ຊື່ວ່ານັກປາດຍ້ອນມີປັນຍາ ຊື່ວ່ານັກປາດຍ້ອນມີປັນຍາເຄື່ອງຊົງຈຳ ຊື່ວ່ານັກປາດຍ້ອນສົມບູນດ້ວຍປັນຍາເຄື່ອງຊົງຈຳ ຊື່ວ່ານັກປາດຍ້ອນຕິຕຽນບາບ

ປັນຍາຕັດຮຽກວ່າ ທີ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມໄຈ້ແຍກ ຄວາມສອດສ່ອງທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ່ມແຈ້ງ ຄວາມຄິດຄົ້ນ ຄວາມພິຈາຣະນາ ປັນຍາເປັນຄືແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ປັນຍາເຄື່ອງເຫັນແຈ້ງ ຄວາມຮູ້ດີ ປັນຍາເປັນຄືປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເປັນຄືອາວຸດ ປັນຍາເປັນຄືຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເປັນຄືດວງປະທີບ ປັນຍາເປັນຄືດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຊື່ວ່ານັກປາດ ຍ້ອນປະກອບດ້ວຍປັນຍານັ້ນ

ອີກໄນໜຶ່ງ ເປັນປາຊໃນຂັນ ປາດໃນທາດ ປາດໃນອາຍະຕະນະ ປາດໃນປະຕິດຈະສະມຸບ ບາດ ປາດໃນສະຕິປັດຖານ ປາດໃນສຳມັບປະທານ ປາດໃນອິດທິບາດ ປາດໃນອິນຊີ ປາດໃນ ພະລະ ປາດໃນໂພດຊົງ ປາດໃນມັກ ປາດໃນຜົນ ປາດໃນນິບພານ ນັກປາດເຫຼົ່ານັ້ນ ກ່າວ ຄື ເວົ້າ ສະແດງ ຊີ້ແຈ່ງ ແນວນີ້ວ່າ ຊີວິດຂອງມະນຸດຈຶ່ງໜ້ອຍ ເລັກໜ້ອຍ ບໍ່ຫຼາຍ ຊົ່ວຂະນະ ທັນທີ ບຶດດຽວ ຕັ້ງຢູ່ບໍ່ດົນ ດຳຣົງຢູ່ບໍ່ດົນ ລວມຄວາມວ່າ ນັກປາດກ່າວວ່າ ຊີວິດນີ້ເປັນຂອງໜ້ອຍ ດ້ວຍ ເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຍ້ອນເຫດນັ້ນ ສັດເກີດເພິ່ງສຶກສາໃນທີ່ນີ້
ເພິ່ງຮູ້ຈັກກຳແນວໃດແນວໜຶ່ງໃນໂລກວ່າ ເປັນກຳທີ່ຜິດ
ບໍ່ເພິ່ງປະພຶດຜິດ ຍ້ອນເຫດແຫ່ງກຳທີ່ຜິດນັ້ນ
ນັກປາດກ່າວວ່າ ຊີວິດນີ້ເປັນຂອງໜ້ອຍ

[໑໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຮົາເຫັນໝູ່ສັດນີ້ ຜູ້ຕົກໄປໃນອຳນາດຕັນຫາໃນພົບທັງຫຼາຍ
ກຳລັງດີ້ນຣົນຢູ່ໃນໂລກ
ນໍຣະຊົນທີ່ຊົ່ວ ຜູ້ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່
ຮ່ຳໄຮຢູ່ໃກ້ປາກມັດຈຸຣາດ

## ວ່າດ້ວຍໝູ່ສັດດີ້ນຣົນຢູ່ໃນໂລກຍ້ອນຕັນຫາ

ຄຳວ່າ ເຮົາເຫັນ ໃນຄຳວ່າ ເຮົາເຫັນ ຯລຯ ກຳລັງດີ້ນຣົນຢູ່ໃນໂລກ ໄດ້ແກ່ ເຮົາເຫັນ ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງ ດ້ວຍມັງສະຈັກຂຸແດ່ ດ້ວຍທິບພະຈັກຂຸແດ່ ດ້ວຍປັນຍາຈັກຂຸແດ່ ດ້ວຍພຸດທະຈັກຂຸແດ່ ດ້ວຍສະມັນຕະຈັກຂຸແດ່

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດ ໂລກ ອາຍະຕະນະໂລກ

ຄຳວ່າ ກຳລັງດີ້ນຣົນຢູ່ ອະທິບາຍວ່າ ເຮົາເຫັນ ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງໝູ່ສັດນີ້ ຜູ້ກຳລັງດີ້ນຣົນ ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະ ສັບກະສ່າຍ ດ້ວຍຄວາມດີ້ນຣົນຍ້ອນຕັນຫາ ດີ້ນຣົນຍ້ອນທິດຖິ ດີ້ນຣົນຍ້ອນກິເລດ ດີ້ນຣົນຍ້ອນ ການປະກອບ ດີ້ນຣົນຍ້ອນວິບາກ ດີ້ນຣົນຍ້ອນທຸຈະຣິດ ຄື

ຜູ້ກຳໜັດກໍດີ້ນຣົນຕາມອຳນາດຣາຄະ
ຜູ້ຂັດເຄືອງກໍດີ້ນຣົນຕາມອຳນາດໂທສະ
ຜູ້ຫຼົງກໍດີ້ນຣົນຕາມອຳນາດໂມຫະ

ຜູ້ຍຶດຕິດກໍດີ້ນຣົນຕາມອຳນາດມານະ
ຜູ້ຍຶດຖືກໍດີ້ນຣົນຕາມອຳນາດທິດຖິ
ຜູ້ຟຸ້ງຊ່ານກໍດີ້ນຣົນຕາມອຳນາດອຸດທັດຈະ
ຜູ້ລັງເລກໍດີ້ນຣົນຕາມອຳນາດວິຈິກິດສາ
ຜູ້ຕົກຢູ່ໃນກຳລັງກິເລດກໍດີ້ນຣົນຕາມອຳນາດອະນຸໄສ

ດີ້ນຣົນຍ້ອນລາບ ຍ້ອນເສື່ອມລາບ ຍ້ອນຍົດ ຍ້ອນເສື່ອມຍົດ ຍ້ອນສັນເສີນ ຍ້ອນນິນທາ ຍ້ອນສຸກ ຍ້ອນທຸກ

ດີ້ນຣົນຍ້ອນຊາດ ຍ້ອນຊະຣາ ຍ້ອນພະຍາທິ ຍ້ອນມໍຣະນະ ຍ້ອນໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກຂະ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ)

ດີ້ນຣົນຍ້ອນທຸກເນື່ອງຈາກການເກີດໃນນະຣົກ ຍ້ອນທຸກເນື່ອງຈາກການເກີດໃນກຳເນີດເດຍຣັດສານ ຍ້ອນທຸກເນື່ອງຈາກການເກີດໃນເຜດວິໄສ ຍ້ອນທຸກເນື່ອງຈາກການເກີດໃນໂລກມະນຸດ ຍ້ອນທຸກເນື່ອງຈາກການຖືກຳເນີດໃນທ້ອງ ຍ້ອນທຸກເນື່ອງຈາກການຢູ່ໃນທ້ອງ ຍ້ອນທຸກເນື່ອງຈາກການເກີດຈາກທ້ອງ ຍ້ອນທຸກທີ່ສືບເນື່ອງຈາກຜູ້ເກີດ ຍ້ອນທຸກຂອງຜູ້ເກີດທີ່ເນື່ອງມາຈາກຜູ້ອື່ນ ຍ້ອນທຸກທີ່ເກີດຈາກຄວາມພະຍາຍາມຂອງຕົນເອງ ຍ້ອນທຸກທີ່ເກີດຈາກຄວາມພະຍາຍາມຂອງຜູ້ອື່ນ ຍ້ອນທຸກທີ່ເກີດຈາກຄວາມທຸກກາຍທຸກໃຈ ຍ້ອນທຸກທີ່ເກີດຈາກສັງຂານ ຍ້ອນທຸກທີ່ເກີດຈາກຄວາມຜັນປ່ຽນ

ດີ້ນຣົນຍ້ອນທຸກທີ່ເກີດຈາກໂຣກທາງຕາ ຍ້ອນທຸກທີ່ເກີດຈາກໂຣກທາງຫູ ຍ້ອນທຸກທີ່ເກີດຈາກໂຣກທາງດັງ ຍ້ອນທຸກທີ່ເກີດຈາກໂຣກທາງລີ້ນ ຍ້ອນທຸກທີ່ເກີດຈາກ ໂຣກທາງກາຍ ຍ້ອນທຸກທີ່ເກີດຈາກໂຣກຫົວ ໆລໆ ໂຣກຫູ ໆລໆ ໂຣກປາກ ໆລໆ ໂຣກແຂ້ວ ໆລໆ ໂຣກໄອ ໆລໆ ໂຣກຫືດ ໆລໆ ໄຂ້ຫວັດ ໆລໆ ໄຂ້ພິດ ໆລໆ ໄຂ້ເຊື່ອມຊຶມ ໆລໆ ໂຣກທ້ອງ ໆລໆ ເປັນລົມສະຫຼົບ ໆລໆ ລົງແດງ ໆລໆ ຈຸກສຽດ ໆລໆ ອະຫິວາຕະກະໂຣກ ໆລໆ ໂຣກຂີ້ທູດ ໆລໆ ຝີ ໆລໆ ກາກ ໆລໆ ຫູອດລົມໂປ່ງພອງ ໆລໆ ລົມບ້າໝູ ໆລໆ ຫິດເປື່ອຍ ໆລໆ ຫິດດ້ານ ໆລໆ ຫິດ ໆລໆ ຫູດ ໆລໆ ໂຣກລະລອກ ໆລໆ ໂຣກບີຊ່ານ ໆລໆ ໂຣກເບົາຫວານ ໆລໆ ໂຣກເຮີມ ໆລໆ ໂຣກພຸພອງ ໆລໆ ໂຣກຣິດສີດວງທະວານ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກບີ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກລົມ ໆລໆ ໄຂ້ສັນນິບາດ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ໆລໆ. ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນ ອິລິຍາບົດບໍ່ໄດ້ສ່ວນກັນ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ໆລໆ. ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ໆລໆ ຄວາມໜາວ ໆລໆ ຄວາມຮ້ອນ ໆລໆ ຄວາມຫິວ ໆລໆ ຄວາມກະຫາຍ ໆລໆ ປວດອຸດຈາຣະ ໆລໆ ປວດປັດສາວະ

ດີ້ນຣົນຍ້ອນທຸກທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ທຸກຍ້ອນມານດາຕາຍ ฯลฯທຸກຍ້ອນບິດາຕາຍ ฯลฯ ທຸກຍ້ອນອ້າຍນ້ອງຊາຍຕາຍ ฯลฯ ທຸກຍ້ອນເອື້ອຍນ້ອງສາວຕາຍ ฯลฯ ທຸກຍ້ອນບຸດຕາຍ ฯลฯ ທຸກຍ້ອນທິດາຕາຍ ฯลฯ ຄວາມພິນາດຂອງຍາດ ฯลฯ ໂພຄະຊັບພິນາດ ฯลฯ ຄວາມເສຍຫາຍທີ່ເກີດຈາກໂຣກ ฯลฯ ສີນວິບັດ ฯลฯ ທິດຖິວິບັດ ລວມຄວາມວ່າ ເຮົາເຫັນ ฯลฯ ກຳລັງດິ້ນຣົນຢູ່ໃນໂລກ

ຄຳວ່າ ໝູ່ສັດ ໃນຄຳວ່າ ໝູ່ສັດນີ້ ຜູ້ຕົກໄປໃນອຳນາດຕັນຫາໃນພົບທັງຫຼາຍ ເປັນຊື່ຮຽກວ່າ ສັດ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ຜູ້ຕົກໄປໃນອຳນາດຕັນຫາ ອະທິບາຍວ່າ ຜູ້ຕົກໄປໃນອຳນາດຕັນຫາ ຄື ໄປຕາມອຳນາດຕັນຫາ ຊ່ານໄປຕາມຕັນຫາ ຈົມລົງໃນຕັນຫາ ຖືກຕັນຫາຍູ້ໃຫ້ຕົກໄປ ຖືກຕັນຫາຄອບງຳ ມີຈິດຖືກຕັນຫາຢຶດຄອງ

ຄຳວ່າ ໃນພົບທັງຫຼາຍ ໄດ້ແກ່ ໃນກາມະພົບ ຮູບພົບ ອະຮູບພົບ ລວມຄວາມວ່າ ໝູ່ສັດນີ້ຜູ້ຕົກໄປໃນອຳນາດຕັນຫາໃນພົບທັງຫຼາຍ

ຄຳວ່າ ນໍຣະຊົນທີ່ຊົ່ວ ໃນຄຳວ່າ ນໍຣະຊົນທີ່ຊົ່ວ ฯลฯ ຮ່ຳໄຮຢູ່ໃກ້ປາກມັດຈຸຣາດ ອະທິບາຍວ່າ ນໍຣະຊົນ ທີ່ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ຍ້ອນປະກອບດ້ວຍກາຍຍະກຳ ฯลฯ ວະຈີກຳ ฯลฯ ມະໂນກຳທີ່ຊົ່ວ ฯลฯ ປານາຕິບາດ ฯลฯ ອະທິນນາທານ ฯลฯ ກາເມສຸມິດສາຈາຣະ ฯลฯ ມຸສາວາທະ ฯลฯ ປິສຸນາວາຈາ ฯลฯ ຜະຣຸສະວາຈາ ฯลฯ ສຳ ຜັບປະລາປະ ฯลฯ ອະພິດຊາ ฯลฯ ພະຍາບາດ ฯลฯ ມິດສາທິດຖິ ฯลฯ ສັງຂານທັງຫຼາຍ .. ກາມມະຄຸນ ໕ ฯลฯ ນີວອນ ໕ ฯลฯ ເຈຕະນາ ฯลฯ ຄວາມປາຖະໜາ ฯลฯ ທີ່ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ຍ້ອນປະກອບດ້ວຍຄວາມຕັ້ງໃຈທີ່ຊົ່ວ ລວມຄວາມວ່າ ນໍຣະຊົນທີ່ຊົ່ວ

ຄຳວ່າ ໃກ້ປາກມັດຈຸຣາດ ໃນຄຳວ່າ ຮ່ຳໄຮຢູ່ໃກ້ປາກມັດຈຸຣາດ ອະທິບາຍວ່າ ນໍຣະຊົນຜູ້ເຖິງມັດຈຸຣາດ ພົບພໍ້ກັບມັດຈຸຣາດ ເຂົ້າເຖິງມັດຈຸຣາດ ເຖິງມານ ພົບພໍ້ກັບມານ ເຂົ້າເຖິງມານ ເຖິງມໍຣະນະ ພົບພໍ້ກັບມໍຣະນະ ເຂົ້າເຖິງມໍຣະນະ ຮ່ຳໄຮ ຄື ລຳພັນ ເສົ້າໂສກ ລຳບາກໃຈ ຄ່ຳຄວນ ຕີເອິກພ່ຳເພີ້ ເຖິງຄວາມຫຼົງໃຫຼ ໃກ້ປາກມານ ໃກ້ປາກມໍຣະນະ ລວມຄວາມວ່າ ນໍຣະຊົນທີ່ຊົ່ວ ฯลฯ ຮ່ຳໄຮຢູ່ໃກ້ປາກມັດຈຸຣາດ

ຄຳວ່າ ຜູ້ຍັງບໍ່ຄາຍຈາກຕັນຫາໃນພົບນ້ອຍພົບໃຫຍ່ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ฯลฯ ທຳມະຕັນຫາ

ຄຳວ່າ ໃນພົບນ້ອຍພົບໃຫຍ່ ອະທິບາຍວ່າ ໃນພົບນ້ອຍພົບໃຫຍ່ ຄື ໃນກຳມະວັດ ແລະ ວິປາກະວັດ ໃນກຳມະວັດເປັນເຄື່ອງເກີດໃນກາມະພົບ ໃນວິປາກະວັດເປັນເຄື່ອງເກີດໃນກາມະພົບ ໃນກຳມະວັດເປັນເຄື່ອງເກີດໃນຮູບພົບ ໃນວິປາກະວັດເປັນເຄື່ອງເກີດໃນຮູບພົບ ໃນກຳມະວັດເປັນເຄື່ອງເກີດໃນອະຮູບພົບ ໃນວິປາກະວັດເປັນເຄື່ອງເກີດໃນອະຮູບພົບ ໃນພົບຕໍ່ໄປໃນຄະຕິຕໍ່ໄປ ໃນການຖືກຳເນີດຕໍ່ໄປ ໃນປະຕິສົນທິຕໍ່ໄປ ໃນການບັງເກີດຂອງອັດຕະພາບຕໍ່ໄປ

ຄຳວ່າ ຜູ້ຍັງບໍ່ຄາຍຕັນຫາ ໄດ້ແກ່ ຜູ້ຍັງບໍ່ຄາຍຕັນຫາ ຄື ບໍ່ປາສະຈາກຕັນຫາ ບໍ່ສະລະຕັນຫາ ບໍ່ຄາຍຕັນຫາ ບໍ່ປົດຕັນຫາ ບໍ່ລະຕັນຫາ ບໍ່ສະລັດຖິ້ມຕັນຫາ ລວມຄວາມວ່າ ຜູ້ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຮົາເຫັນໝູ່ສັດນີ້ ຜູ້ຕົກໄປໃນອຳນາດຕັນຫາໃນພົບທັງຫຼາຍ
ກຳລັງດີ້ນຣົນຢູ່ໃນໂລກ
ນໍຣະຊົນທີ່ຊົ່ວ ຜູ້ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່
ຮ່ຳໄຮຢູ່ໃກ້ປາກມັດຈຸຣາດ

[໑໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພວກທ່ານຈົ່ງເບິ່ງໝູ່ສັດຜູ້ກຳລັງດີ້ນຣົນຢູ່
ຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ
ເໝືອນຝູງປາໃນນ້ຳນ້ອຍສິ້ນກະແສແລ້ວ
ນໍຣະຊົນເຫັນໂທດນີ້ແລ້ວ ກໍຢ່າກໍ່ຕັນຫາເຄື່ອງກ່ຽວຂ້ອງໃນພົບທັງຫຼາຍ
ເພິ່ງປະພຶດບໍ່ຍຶດຖືວ່າເປັນຂອງເຮົາ

## ວ່າດ້ວຍຄວາມຍຶດຖື ໒ ຢ່າງ

ຄຳວ່າ ພວກທ່ານຈົ່ງເບິ່ງໝູ່ສັດຜູ້ກຳລັງດີ້ນຣົນຢູ່ ຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ອະທິບາຍ ວ່າ

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າ ເປັນຂອງເຮົາດ້ວຍອຳນາດທິດຖິ

ຄວາມຍຶດຖືວ່າ ເປັນຂອງເຮົາດ້ວຍອຳນາດຕັນຫາ ເປັນແນວໃດ?

ຄື ວັດຖຸທີ່ເຮັດໃຫ້ເປັນເຂດ ເປັນແດນ ເປັນສ່ວນ ເປັນຜະແໜກ ກຳນົດຖືເອົາ ຍຶດຖືວ່າເປັນຂອງເຮົາ ດ້ວຍສ່ວນແຫ່ງຕັນຫາມີປະມານເທົ່າໃດ ຍ່ອມຍຶດຖືວ່າເປັນຂອງເຮົາເຊິ່ງວັດຖຸ

ມີປະມານເທົ່ານີ້ວ່າ ນີ້ຂອງເຮົາ ນັ້ນຂອງເຮົາ ເທົ່ານີ້ຂອງເຮົາ ຂອງເຮົາມີປະມານເທົ່ານີ້ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຍິງຊາຍ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ທີ່ນາ ທີ່ສວນ ເງິນ ຄຳ ບ້ານ ນິຄົມ ຣາດຊະທານີ ແຄວ້ນ ຊົນນະບົດ ກອງພົນ ຮົບ ຄັງຫຼວງ ແມ່ນວ່າມະຫາປະຖະພີທັງໝົດຍ່ອມຍຶດຖືວ່າເປັນຂອງເຮົາດ້ວຍ ອຳນາດຕັນຫາ ເຊິ່ງຈຳແນກໄດ້ ໑໐໘ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ

ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ເປັນແນວໃດ?

ຄື ສັກກາຍະທິດຖິມີວັດຖຸ ໒໐ ມິດສາທິດຖິມີວັດຖຸ ໑໐ ອັນຕະຄາຫິກະທິດຖິມີວັດຖຸ ໑໐ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບຄືທິດຖິ ຄວາມກັນດານຄືທິດຖິ ສ້ຽນໜາມຄືທິດຖິ ຄວາມດີ້ນຮົນຄືທິດຖິ ເຄື່ອງຜູກພັນຄືທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຍຶດໝັ້ນ ຄວາມຍຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖືຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິປະລາດ ຄວາມຖືຜິດ ຄວາມຖືໃນສິ່ງທີ່ບໍ່ເປັນຄວາມຈິງວ່າເປັນຈິງເຫັນປານນີ້ຈົນເຖິງທິດຖິ ໖໔ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ

ຄຳວ່າ ພວກນາງຈົ່ງເບິ່ງໝູ່ສັດຜູ້ກຳລັງດີ້ນຮົນຢູ່ ຍ້ອນວັດຖຸທີ່ຍຶດຖືວ່າເປັນ ຂອງເຮົາ ອະທິບາຍວ່າ ໝູ່ສັດຜູ້ຫວາດຣະແວງວ່າຈະມີຜູ້ແຍ່ງຊິງວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນກຳລັງຖືກແຍ່ງຊິງໄປ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນຖືກ ແຍ່ງຊິງໄປແລ້ວ ຍ່ອມດີ້ນຮົນແດ່ ໝູ່ສັດຜູ້ຫວາດຣະແວງວ່າ ຈະມີຄວາມຜັນປ່ຽນໄປແຫ່ງວັດຖຸທີ່ຕົນຍຶດຖືວ່າເປັນຂອງເຮົາ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນກຳລັງຜັນປ່ຽນໄປ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນຜັນປ່ຽນໄປແລ້ວ ຍ່ອມດີ້ນຮົນແດ່ ຄື ກະວົນກະວາຍ ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະສັບກະສ່າຍຢູ່ ພວກນາງຈົ່ງເບິ່ງ ຄື ແລເບິ່ງ ແນມເບິ່ງ ເພ່ງພິນິດ ພິຈາລະນາເບິ່ງ ໝູ່ສັດ ຜູ້ກຳລັງດີ້ນຮົນຢູ່ ຄື ກະວົນກະວາຍ ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະສັບກະສ່າຍຢູ່ແນວນີ້ ລວມຄວາມວ່າ ພວກທ່ານຈົ່ງເບິ່ງ ໝູ່ສັດຜູ້ກຳລັງດີ້ນຮົນຢູ່ ຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ

ຄຳວ່າ ເໝືອນຝູງປາໃນນ້ຳນ້ອຍສິ້ນກະແສແລ້ວ ອະທິບາຍວ່າ ໝູ່ສັດຜູ້ຫວາດ ຣະແວງວ່າຈະມີຜູ້ແຍ່ງຊິງວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນກຳລັງ ຖືກແຍ່ງຊິງໄປ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນຖືກແຍ່ງຊິງໄປແລ້ວ ຍ່ອມດີ້ນຮົນແດ່

ໝູ່ສັດຜູ້ຫວາດຣະແວງວ່າຈະມີຄວາມຜັນປ່ຽນໄປແຫ່ງວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນກຳລັງຜັນປ່ຽນໄປ ຍ່ອມດີ້ນຮົນແດ່ ເມື່ອວັດຖຸນັ້ນຜັນປ່ຽນໄປແລ້ວ ຍ່ອມດີ້ນຮົນແດ່ ຄືກະວົນກະວາຍ ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະສັບກະສ່າຍຢູ່ ເໝືອນຝູງປາໃນນ້ຳນ້ອຍ ຄື ນ້ຳບໍ່ຫຼາຍ ນ້ຳແຫ້ງໄປ ຖືກກາ ແຫຼວ ຫຼື ນົກຍາງເວີນ

ລົງມາຕອດກິນກໍດີ້ນຣົນ ກະວົນກະວາຍ ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະສັບກະສ່າຍຢູ່ ສະນັ້ນ ລວມ ຄວາມວ່າ ເໝືອນຝູງປາໃນນໍ້ານ້ອຍສິ້ນກະແສແລ້ວ

ຄໍາວ່າ ນໍຣະຊົນເຫັນໂທດນີ້ແລ້ວ ຯລຯ ເພິ່ງປະພຶດບໍ່ຢຶດຖືວ່າເປັນຂອງເຮົາ ອະທິບາຍວ່າ ນໍຣະຊົນເຫັນແລ້ວ ຄື ແນມເຫັນແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງໂທດນີ້ຍ້ອນວັດຖຸທີ່ຢຶດຖືວ່າເປັນຂອງເຮົາ ລວມຄວາມວ່າ ນໍຣະຊົນເຫັນ ໂທດນີ້ແລ້ວ

ຄໍາວ່າ ເພິ່ງປະພຶດບໍ່ຢຶດຖືວ່າເປັນຂອງເຮົາ ອະທິບາຍວ່າ

ຄໍາວ່າ ຄວາມຢຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຢຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຢຶດຖືວ່າເປັນຂອງເຮົາດ້ວຍອໍານາດຕັນຫາ (໒) ຄວາມຢຶດຖືວ່າເປັນຂອງເຮົາດ້ວຍອໍານາດທິດຖິ ຯລຯ ນີ້ຊື່ວ່າຄວາມຢຶດຖືວ່າເປັນຂອງເຮົາດ້ວຍອໍານາດຕັນຫາ ຯລຯ ນີ້ຊື່ວ່າຄວາມຢຶດຖືວ່າເປັນຂອງເຮົາດ້ວຍອໍານາດທິດຖິ

ນໍຣະຊົນລະຄວາມຢຶດຖືວ່າເປັນຂອງເຮົາດ້ວຍອໍານາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຢຶດຖືວ່າເປັນຂອງເຮົາດ້ວຍອໍານາດທິດຖິໄດ້ແລ້ວ ບໍ່ຢຶດຖືຕາວ່າເປັນຂອງເຮົາ ບໍ່ຢຶດຖືຫູວ່າເປັນຂອງເຮົາ ບໍ່ຢຶດຖືດັງວ່າເປັນຂອງເຮົາ ບໍ່ຢຶດຖືລີ້ນວ່າເປັນຂອງເຮົາ ບໍ່ຢຶດຖືກາຍວ່າເປັນຂອງເຮົາ ບໍ່ຢຶດຖືໃຈວ່າເປັນຂອງເຮົາ ບໍ່ຢຶດຖື ບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ທໍາມາຣົມ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ກາມທາດ ຯລຯ ຮູບທາດ ຯລຯ ອະຮູບທາດ ຯລຯ ກາມາພົບ ຯລຯ ຮູບພົບ ຯລຯ ອະຮູບພົບ ຯລຯ ສັນຍາພົບ ຯລຯ ອະສັນຍາພົບ ຯລຯ ເນວະສັນຍານາສັນຍາພົບ ຯລຯ ເອກະໂວກາຣະພົບ໑ ຯລຯ ຈະຕຸໂວກາຣະພົບ໔ ຯລຯ ປັນຈະໂວກາຣະພົບ໕ ຯລຯ ອະດີດ ຯລຯ ອະນາຄົດ ຯລຯ ປັດຈຸບັນ ຯລຯ ຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທໍາມາຣົມທີ່ເພິ່ງຮູ້ແຈ້ງວ່າເປັນຂອງເຮົາ ເພິ່ງປະພຶດ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດໍາເນີນໄປ ຍັງຊີວິດໃຫ້ດໍາເນີນໄປ ລວມຄວາມວ່າ ນໍຣະຊົນເຫັນໂທດນີ້ແລ້ວ ຯລຯ ເພິ່ງປະພຶດບໍ່ຢຶດຖືວ່າເປັນຂອງເຮົາ

ຄໍາວ່າ ໃນພົບທັງຫຼາຍ ໃນຄໍາວ່າ ຢ່າກໍ່ຕັນຫາເຄື່ອງກ່ຽວຂ້ອງໃນພົບທັງຫຼາຍ ໄດ້ແກ່ ໃນກາມາພົບ ຮູບພົບ ອະຮູບພົບ ຕັນຫາຕັດຮຽກວ່າ ເຄື່ອງກ່ຽວຂ້ອງ ຄື ຄວາມກໍາໜັດ ຄວາມກໍາໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຄໍາວ່າ ຢ່າກໍ່ຕັນຫາເຄື່ອງກ່ຽວຂ້ອງໃນພົບທັງຫຼາຍ ອະທິບາຍວ່າ ຢ່າກໍ່ ຕັນຫາເຄື່ອງກ່ຽວຂ້ອງໃນພົບທັງຫຼາຍ ຄື ຢ່າກໍ່ ຢ່າໃຫ້ເກີດ ຢ່າໃຫ້ເກີດຂຶ້ນ ຢ່າໃຫ້ບັງເກີດ ຢ່າໃຫ້ບັງເກີດຂຶ້ນ

ເຊິ່ງຄວາມພໍໃຈ ຄວາມຮັກ ຄວາມຕ້ອງການ ຄວາມພໍໃຈ ລວມຄວາມວ່າ ຢ່າກໍ່ຕັນຫາເຄື່ອງກ່ຽວຂ້ອງໃນພົບທັງຫຼາຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

พວກທ່ານຈົ່ງເບິ່ງໝູ່ສັດຜູ້ກຳລັງດີ້ນຮົນຢູ່
ຍ້ອນວັດຖຸທີ່ຢຶດຖືວ່າເປັນຂອງເຮົາ
ເໝືອນຝູງປາໃນນ້ຳນ້ອຍສິ້ນກະແສແລ້ວ
ນໍຣະຊົນເຫັນໂທດນີ້ແລ້ວ ກໍຢ່າກໍ່ຕັນຫາເຄື່ອງກ່ຽວຂ້ອງໃນພົບທັງຫຼາຍ
ເພິ່ງປະພຶດບໍ່ຢຶດຖືວ່າເປັນຂອງເຮົາ

[໑໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນັກປາດ ເພິ່ງກຳຈັດຄວາມພໍໃຈໃນສ່ວນສຸດທັງ ໒ ດ້ານ
ກຳນົດຮູ້ຜັດສະແລ້ວ ກໍບໍ່ຕິດໃຈ
ຕິຕຽນກຳໃດດ້ວຍຕົນ ກໍບໍ່ເຮັດກຳນັ້ນ
ບໍ່ຕິດໃນສິ່ງທີ່ໄດ້ເຫັນແລະໄດ້ຍິນແລ້ວ

ຄຳວ່າ ເພິ່ງກຳຈັດຄວາມພໍໃຈໃນສ່ວນສຸດທັງ ໒ ດ້ານ ອະທິບາຍວ່າ

ຄຳວ່າ ສ່ວນສຸດ ໄດ້ແກ່ ຜັດສະ ເປັນສ່ວນສຸດດ້ານໜຶ່ງ ເຫດເກີດແຫ່ງຜັດສະເປັນສ່ວນສຸດອີກດ້ານໜຶ່ງ ອະດີດເປັນສ່ວນສຸດດ້ານໜຶ່ງ ອະນາຄົດເປັນສ່ວນສຸດອີກດ້ານໜຶ່ງ ສຸກຂະເວທະນາ ເປັນສ່ວນສຸດດ້ານໜຶ່ງ ທຸກຂະເວທະນາເປັນສ່ວນສຸດອີກດ້ານໜຶ່ງ ນາມເປັນສ່ວນສຸດດ້ານໜຶ່ງ ຮູບເປັນສ່ວນສຸດອີກດ້ານໜຶ່ງ ອາຍະຕະນະພາຍໃນ ໖ ເປັນສ່ວນສຸດດ້ານໜຶ່ງ ອາຍະຕະນະພາຍນອກ ໖ ເປັນສ່ວນສຸດອີກດ້ານໜຶ່ງ ຄວາມຖືຕົວເປັນສ່ວນສຸດດ້ານໜຶ່ງ ເຫດເກີດແຫ່ງຄວາມຖືຕົວເປັນສ່ວນສຸດອີກດ້ານໜຶ່ງ

ຄຳວ່າ ຄວາມພໍໃຈ ໄດ້ແກ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມມີເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍອຳນາດຄວາມຕ້ອງການ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເຄື່ອງປະກອບຄືຄວາມຕ້ອງການ ຄວາມຢຶດຖືດ້ວຍອຳນາດຄວາມຕ້ອງການ ກິເລດເຄື່ອງກັ້ນຈິດຄືຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍ

ຄຳວ່າ ເພິ່ງກຳຈັດຄວາມພໍໃຈໃນສ່ວນສຸດທັງ ໒ ດ້ານ ໄດ້ແກ່ ເພິ່ງກຳຈັດ ຄື ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມພໍໃຈໃນສ່ວນສຸດທັງ ໒ ດ້ານ ລວມຄວາມວ່າ ເພິ່ງກຳຈັດຄວາມພໍໃຈໃນສ່ວນສຸດທັງ ໒ ດ້ານ

## ວ່າດ້ວຍຜັດສະຕ່າງ ໆ

ຄຳວ່າ ກຳນົດຮູ້ຜັດສະແລ້ວ ກໍບໍ່ຕິດໃຈ ອະທິບາຍວ່າ

ຄຳວ່າ ຜັດສະ ໄດ້ແກ່ ຈັກຂຸສຳຜັດ (ສຳຜັດທາງຕາ) ໂສຕະສຳຜັດ (ສຳຜັດທາງຫູ) ຄານະສຳຜັດ (ສຳຜັດທາງດັງ) ຊິວຫາສຳຜັດ (ສຳຜັດທາງລີ້ນ) ກາຍະສຳຜັດ (ສຳຜັດທາງກາຍ) ມະໂນສຳຜັດ (ສຳຜັດທາງໃຈ) ອະທິວະຈະນະສຳຜັດ (ສຳຜັດທີ່ເກີດທາງມະໂນທະວານ) ປະຕິຄະສຳຜັດ (ສຳຜັດແຫ່ງການກະທົບໃຈ) ສຸຂະເວທະນີຍະຜັດສະ (ຜັດສະເປັນບ່ອນຕັ້ງແຫ່ງສຸກຂະເວທະນາ) ທຸກຂະເວທນີຍະຜັດສະ (ຜັດສະເປັນບ່ອນຕັ້ງແຫ່ງທຸກຂະເວທະນາ) ອະທຸກຂະມະສຸຂະເວທະນີຍະຜັດສະ (ຜັດສະເປັນບ່ອນຕັ້ງແຫ່ງອະທຸກຂະມະສຸຂະເວທະນາ) ຜັດສະທີ່ເປັນກຸສົນ ຜັດສະທີ່ເປັນອະກຸສົນ ຜັດສະທີ່ເປັນອັບພະຍາກະຕະ ຜັດສະທີ່ເປັນກາມາວະຈອນ ຜັດສະທີ່ເປັນຮູບປາວະຈອນ ຜັດສະທີ່ເປັນອະຮູບປາວະຈອນ ສູນຍະຕະຜັດສະ ອະນິມິດຕະຜັດສະ ອັບປະນິຫິຕະຜັດສະ ຜັດສະທີ່ເປັນໂລກິຍະ ຜັດສະທີ່ເປັນໂລກຸດຕະຣະ ຜັດສະທີ່ເປັນອະດີດ ຜັດສະທີ່ເປັນອະນາຄົດ ຜັດສະທີ່ເປັນປັດຈຸບັນ ຜັດສະຄວາມຖືກຕ້ອງ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງເຫັນປານນີ້ ນີ້ຕັດຮຽກວ່າ ຜັດສະ

## ວ່າດ້ວຍປະຣິນຍາ ໓

ຄຳວ່າ ກຳນົດຮູ້ຜັດສະແລ້ວ ອະທິບາຍວ່າ ກຳນົດຮູ້ຜັດສະດ້ວຍປະຣິນຍາ ໓ ຄື (໑) ຍາຕະປະຣິນຍາ (ການກຳນົດຮູ້ຂັ້ນຮູ້ຈັກ) (໒) ຕີຣະນະປະຣິນຍາ (ການກຳນົດຮູ້ຂັ້ນພິຈາລະນາ) (໓) ປະຫານະປະຣິນຍາ (ການກຳນົດຮູ້ຂັ້ນລະ)

ຍາຕະປະຣິນຍາ ເປັນແນວໃດ?

ຄື ນັກປາດຮູ້ຈັກຜັດສະ ຄື ຮູ້ ເຫັນວ່າ ນີ້ຈັກຂຸສຳຜັດ ນີ້ໂສຕະສຳຜັດ ນີ້ຄານະສຳຜັດ ນີ້ຊິວຫາສຳຜັດ ນີ້ກາຍະສຳຜັດ ນີ້ມະໂນສຳຜັດ ນີ້ອະທິວະຈະນະສຳຜັດ ນີ້ປະຕິຄະສຳຜັດ ນີ້ຜັດສະເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ນີ້ຜັດສະເປັນບ່ອນຕັ້ງແຫ່ງທຸກຂະເວທະນາ ນີ້ຜັດສະເປັນບ່ອນຕັ້ງແຫ່ງອະທຸກຂະມະສຸຂະເວທະນາ ນີ້ຜັດສະທີ່ເປັນກຸສົນ ນີ້ຜັດສະທີ່ເປັນອະກຸສົນ ນີ້ຜັດສະທີ່ເປັນອັບພະຍາກະຕະ ນີ້ຜັດສະທີ່ເປັນກາມາວະຈອນ ນີ້ຜັດສະທີ່ເປັນຮູບປາວະຈອນ ນີ້ຜັດສະທີ່ເປັນອະຮູບປາວະຈອນ ນີ້ສູນຍະຕະຜັດສະ ນີ້ອະນິມິດຕະຜັດສະ ນີ້ອັບປະນິຫິຕະ ຜັດສະ ນີ້ຜັດສະທີ່ເປັນໂລກິຍະ ນີ້ຜັດສະທີ່ເປັນໂລກຸດຕະຣະ ນີ້ຜັດສະທີ່ເປັນອະດີດ ນີ້ຜັດສະທີ່ເປັນອະນາຄົດ ນີ້ຜັດສະທີ່ເປັນປັດຈຸບັນ ນີ້ຊື່ວ່າຍາຕະປະຣິນຍາ

ຕີຣະນະປະຣິນຍາ ເປັນແນວໃດ?

ຄື ນັກປາດເຮັດສິ່ງທີ່ຮູ້ແລ້ວໃຫ້ຜາກົດແນວນີ້ແລ້ວ ພິຈາລະນາຜັດສະ ຄື ພິຈາລະນາ

ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນໂຣກ ເປັນເປັນຄືຫົວຝີ ເປັນເປັນຄືລູກສອນ ເປັນຂອງລຳບາກ ເປັນອາພາດ ເປັນຢ່າງອື່ນ (ບັງຄັບບໍ່ໄດ້) ເປັນຂອງຊຸດໂຊມ ເປັນເສນີຍະ ເປັນອຸປັດທະວະ ເປັນໄພ ເປັນອຸປະສັກ ເປັນຂອງຫວັ່ນໄຫວ ເປັນຂອງຜຸພັງ ເປັນຂອງບໍ່ຍັ່ງຍືນ ເປັນຂອງບໍ່ມີທີ່ຕ້ານທານ ເປັນຂອງບໍ່ມີທີ່ຫຼົບຫຼີ້ ເປັນຂອງບໍ່ມີທີ່ເພິ່ງ ເປັນຂອງວ່າງ ເປັນຂອງເປົ່າ ເປັນຂອງສູນ ເປັນອະນັດຕາ ເປັນຂອງມີໂທດ ເປັນຂອງຜັນປ່ຽນໄປເປັນທຳມະດາ ເປັນຂອງບໍ່ມີແກ່ນສານ ເປັນເຫດແຫ່ງຄວາມລຳບາກ ເປັນເປັນຄືເພດຊະຄາດ ເປັນຂອງປາສະຈາກຄວາມຈະເລີນ ເປັນຂອງມີອາສະວະ ເປັນຂອງທີ່ຖືກເຫດປັດໄຈປຸງແຕ່ງ ເປັນເຍື່ອແຫ່ງມານ ມີຊາດ (ຄວາມເກີດ) ເປັນທຳມະດາ ມີຊະຣາ (ຄວາມແກ່) ເປັນທຳມະດາ ມີພະຍາທິ (ຄວາມເຈັບປ່ວຍ) ເປັນທຳມະດາ ມີມໍຣະນະເປັນທຳມະດາ ມີໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກຂະ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ເປັນທຳມະດາ ມີຄວາມເສົ້າໝອງເປັນທຳມະດາ ເປັນເຫດເກີດທຸກ ຕັ້ງຢູ່ບໍ່ໄດ້ ຫາຄວາມແຊ່ມຊື່ນບໍ່ໄດ້ ເປັນໂທດ ເປັນຂອງທີ່ຕ້ອງສະລັດອອກໄປ ນີ້ຊື່ວ່າ ຕີຣະນະປະຣິນຍາ

ປະຫານະປະຣິນຍາ ເປັນແນວໃດ?

ຄື ນັກປາດເມື່ອພິຈາລະນາເຫັນແນວນີ້ແລ້ວ ຍ່ອມລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຜັດສະ ສົມຈິງດັ່ງທີ່ພຣະ ຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຜັດສະທັງຫຼາຍສາ ຜັດສະນັ້ນ ທ່ານທັງຫຼາຍລະໄດ້ເດັດຂາດແລ້ວແນວນີ້ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ນີ້ຊື່ວ່າປະຫານະປະຣິນຍາ

ຄຳວ່າ ກຳນົດຮູ້ຜັດສະແລ້ວ ໄດ້ແກ່ ກຳນົດຮູ້ຜັດສະດ້ວຍປະຣິນຍາ ໓ ຢ່າງ ເຫຼົ່ານີ້ແລ້ວ

ຄຳວ່າ ບໍ່ຕິດໃຈ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຕິດໃຈ ໄດ້ແກ່ ຄວາມ ກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຄວາມຕິດໃຈນີ້ ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຮຽກວ່າ ຜູ້ບໍ່ຕິດໃຈ ຜູ້ນັ້ນບໍ່ຕິດໃຈ ຄື ບໍ່ຍິນດີ ບໍ່ສະຍົບ ບໍ່ມົກມຸ້ນໃນຮູບ ຯລຯສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ກາມທາດ ຯລຯ ຮູບທາດ ຯລຯ ອະຮູບທາດ ຯລຯ ກາມາພົບ ຯລຯ ຮູບພົບ ຯລຯ ອະຮູບພົບ ຯລຯ ສັນຍາພົບ ຯລຯ ອະສັນຍາພົບ ຯລຯ ເນວະສັນຍານາສັນຍາພົບ ຯລຯ ເອກະໂວກາຣະພົບ ຯລຯ ຈະຕຸໂວກາຣະພົບ ຯລຯ ປັນຈະໂວກາຣະພົບ ຯລຯອະດີດ

ໆລໆ ອະນາຄົດ ໆລໆ ປັດຈຸບັນ ໆລໆ ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ໄດ້ແກ່ ເປັນຜູ້ຄາຍຄວາມຕິດໃຈແລ້ວ ປາສະຈາກຄວາມຕິດໃຈແລ້ວ ສະລະຄວາມຕິດໃຈແລ້ວ ຄາຍຄວາມຕິດໃຈແລ້ວ ປ່ອຍຄວາມຕິດໃຈແລ້ວ ລະຄວາມຕິດໃຈແລ້ວ ສະລັດຖິ້ມຄວາມຕິດໃຈແລ້ວ ຄື ເປັນຜູ້ຄາຍຄວາມກຳໜັດແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ກຳນົດຮູ້ຜັດສະແລ້ວກໍບໍ່ຕິດໃຈ

ຄຳວ່າ ໃດ ໃນຄຳວ່າ ຕິຕຽນກຳໃດດ້ວຍຕົນກໍບໍ່ເຮັດກຳນັ້ນ ໄດ້ແກ່ ກຳໃດ?

ຄຳວ່າ ຕິຕຽນ (ກຳ) ໃດດ້ວຍຕົນ ອະທິບາຍວ່າ ນັກປາດຕິຕຽນຕົນຍ້ອນເຫດ ໒ ຢ່າງ ຄື (໑) ຍ້ອນເຮັດ (໒) ຍ້ອນບໍ່ເຮັດ

ນັກປາດຕິຕຽນຕົນຍ້ອນເຮັດແລະຍ້ອນບໍ່ເຮັດ ເປັນແນວໃດ?

ຄື ນັກປາດຍ່ອມຕິຕຽນຕົນວ່າ ເຮົາເຮັດກາຍທຸດຈະຣິດ ບໍ່ເຮັດກາຍສຸດຈະຣິດ ເຮົາເຮັດວະຈີທຸດຈະຣິດ ບໍ່ເຮັດວະຈີສຸດຈະຣິດ ເຮົາເຮັດມະໂນທຸດຈະຣິດ ບໍ່ເຮັດມະໂນສຸດຈະຣິດ ຄືນັກປາດຍ່ອມຕິຕຽນຕົນວ່າ ເຮົາເຮັດປານາຕິບາດ (ການຂ້າສັດ) ບໍ່ເຮັດຄວາມງົດເວັ້ນຈາກປານາຕິບາດ ເຮົາເຮັດອະທິນນາທານ (ການລັກຊັບ) ບໍ່ເຮັດຄວາມງົດເວັ້ນຈາກອະທິນນາທານ ເຮົາເຮັດກາເມສຸມິດສາຈານ (ປະພຶດຜິດໃນກາມ) ບໍ່ເຮັດຄວາມງົດເວັ້ນຈາກກາເມສຸມິດສາຈານ ເຮົາເຮັດມຸສາວາທະ (ການເວົ້າຕົວະ) ບໍ່ເຮັດຄວາມງົດເວັ້ນຈາກມຸສາວາດ ເຮົາເຮັດປິສຸນາວາຈາ (ການເວົ້າສັບສໍ່) ບໍ່ເຮັດຄວາມງົດເວັ້ນຈາກປິສຸນາວາຈາ ເຮົາເຮັດຜະຣຸສະວາຈາ (ການເວົ້າຫຍາບຄາຍ) ບໍ່ເຮັດຄວາມງົດເວັ້ນຈາກຜະຣຸສະວາຈາ ເຮົາເຮັດສຳຜັບປະລາປະ (ການເວົ້າເພີ້ເຈີ້) ບໍ່ເຮັດຄວາມງົດເວັ້ນຈາກສຳຜັບປະລາປະ ເຮົາເຮັດອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ) ບໍ່ເຮັດອະນະພິດຊາ ເຮົາເຮັດພະຍາບາດ (ຄວາມຄິດປອງຮ້າຍ) ບໍ່ເຮັດອະພະຍາບາດ ເຮົາເຮັດມິດສາທິດຖິ (ຄວາມເຫັນຜິດ) ບໍ່ເຮັດສຳມາທິດຖິ ນັກປາດຊື່ວ່າຕິຕຽນຕົນຍ້ອນເຮັດແລະຍ້ອນບໍ່ເຮັດ ເປັນແນວນີ້

ອີກໄນໜຶ່ງ ນັກປາດຍ່ອມຕິຕຽນຕົນວ່າ ເຮົາບໍ່ຮັກສາສີນໃຫ້ບໍລິບູນ ບໍ່ສັງລວມ ໃນອິນຊີທັງ ໖ ບໍ່ຮູ້ຈັກປະມານໃນການບໍຣິໂພກອາຫານ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ສະເໝີ ບໍ່ໝັ່ນປະກອບດ້ວຍສະຕິສຳປະຊັນຍະ ບໍ່ຈະເລີນສະຕິປັດຖານ ໔ ບໍ່ຈະເລີນສຳມັບປະທານ ໔ ບໍ່ຈະເລີນອິດທິບາດ ໔ ບໍ່ຈະເລີນອິນຊີ ໕ ບໍ່ຈະເລີນພະລະ ໕ ບໍ່ຈະເລີນໂພດຊົງ ໗ ບໍ່ຈະເລີນອະຣິຍະມັກມີອົງ ໘ ບໍ່ກຳນົດຮູ້ທຸກ ບໍ່ລະສະມຸໄທ ບໍ່ຈະເລີນມັດ ບໍ່ເຮັດໃຫ້ແຈ້ງນິໂຣດ ນັກປາດຊື່ວ່າຕິຕຽນຕົນຍ້ອນເຮັດແລະຍ້ອນບໍ່ເຮັດ ເປັນແນວນີ້

ນັກປາດບໍ່ເຮັດ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນເຊິ່ງກຳທີ່ຕິຕຽນຕົນ ດ້ວຍອາການແນວນີ້ ລວມຄວາມວ່າ ນັກປາດຕິຕຽນກຳໃດດ້ວຍຕົນກໍບໍ່ເຮັດກຳນັ້ນ

ຄຳວ່າ ນັກປາດ ຯລຯ ບໍ່ຕິດໃນສິ່ງທີ່ໄດ້ເຫັນແລະໄດ້ຍິນແລ້ວ ອະທິບາຍວ່າ

ຄຳວ່າ ຄວາມຕິດ ໄດ້ແກ່ ຄວາມຕິດ ໒ ຢ່າງ ຄື (໑) ຄວາມຕິດດ້ວຍອຳນາດຕັນຫາ (໒) ຄວາມຕິດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າ ຄວາມຕິດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຕິດດ້ວຍອຳນາດທິດຖິ

ຄຳວ່າ ນັກປາດ ໄດ້ແກ່ ນັກປາດ ຄື ຜູ້ເປັນບັນດິດ ຜູ້ມີປັນຍາ ຜູ້ມີປັນຍາເຄື່ອງຕັດສະຮູ້ ຜູ້ມີຍານ ຜູ້ມີປັນຍາແຈ່ມແຈ້ງ ຜູ້ມີປັນຍາເຄື່ອງທຳລາຍກິເລດ

ນັກປາດລະຄວາມຕິດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຕິດດ້ວຍອຳນາດທິດຖິ ໄດ້ແລ້ວ ບໍ່ຕິດ ຄື ບໍ່ຕິດພັນ ບໍ່ເຂົ້າໄປຕິດໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ຄື ເປັນຜູ້ບໍ່ຕິດແລ້ວ ບໍ່ຕິດພັນແລ້ວ

ບໍ່ເຂົ້າໄປຕິດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ (ຈາກຄວາມຕິດ) ຢູ່ ລວມຄວາມວ່າ ນັກປາດ ຯລຯ ບໍ່ຕິດໃນສິ່ງທີ່ໄດ້ເຫັນແລະໄດ້ຍິນແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ນັກປາດ ເພິ່ງກຳຈັດຄວາມພໍໃຈໃນສ່ວນສຸດທັງ ໒ ດ້ານ
ກຳນົດຮູ້ຜັດສະແລ້ວ ກໍບໍ່ຕິດໃຈ
ຕິຕຽນກຳໃດດ້ວຍຕົນ ກໍບໍ່ເຮັດກຳນັ້ນ
ບໍ່ຕິດໃນສິ່ງທີ່ໄດ້ເຫັນແລະໄດ້ຍິນແລ້ວ

[໑໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີກຳນົດຮູ້ສັນຍາແລ້ວ ບໍ່ເຂົ້າໄປຕິດໃນຄວາມຍຶດຖືທັງຫຼາຍ
ເພິ່ງຂ້າມໂອຄະໄດ້ ຖອນລູກສອນໄດ້ແລ້ວ ບໍ່ຜະໝາດ
ປະພຶດຢູ່ ຍ່ອມບໍ່ຫວັງໂລກນີ້ແລະໂລກໜ້າ

ຄຳວ່າ ກຳນົດຮູ້ສັນຍາແລ້ວ ຯລຯ ເພິ່ງຂ້າມໂອຄະໄດ້ ອະທິບາຍວ່າ

ຄຳວ່າ ສັນຍາ ໄດ້ແກ່ ກາມສັນຍາ ພະຍາບາດສັນຍາ ວິຫິງສາສັນຍາ ເນກຂຳມະສັນຍາ ອັບພະຍາບາດສັນຍາ ອະວິຫິງສາສັນຍາ ຮູບສັນຍາ ສັດທະສັນຍາ ຄັນທະສັນຍາ ຣະສະສັນຍາ ໂຜດຖັບພະສັນຍາ ທຳມະສັນຍາ ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ເຫັນປານນີ້ ນີ້ຕັດຮຽກວ່າ ສັນຍາ

ຄຳວ່າ ກຳນົດຮູ້ສັນຍາແລ້ວ ໄດ້ແກ່ ກຳນົດຮູ້ສັນຍາ ດ້ວຍປະຣິນຍາ ໓ ຢ່າງ ຄື (໑) ຍາຕະປະຣິນຍາ (໒) ຕີຣະນະປະຣິນຍາ (໓) ປະຫານະປະຣິນຍາ

ຍາຕະປະຣິນຍາ ເປັນແນວໃດ?

ຄື ມຸນີຮູ້ຈັກສັນຍາ ຄືຮູ້ ເຫັນວ່າ ນີ້ກາມສັນຍາ ນີ້ພະຍາບາດສັນຍາ ນີ້ວິຫິງສາສັນຍາ ນີ້ເນກຂຳມະສັນຍາ ນີ້ອັບພະຍາບາດສັນຍາ ນີ້ອະວິຫິງສາສັນຍາ ນີ້ຮູບສັນຍາ ນີ້ສັດທະສັນຍາ ນີ້ຄັນທະສັນຍາ ນີ້ຣະສະສັນຍາ ນີ້ໂຜດຖັບພະສັນຍາ ນີ້ທຳມະສັນຍາ ນີ້ຊື່ວ່າຍາຕະປະຣິນຍາ

ຕີຣະນະປະຣິນຍາ ເປັນແນວໃດ?

ຄື ມຸນີເຮັດສິ່ງທີ່ຮູ້ແລ້ວໃຫ້ຜາກົດແນວນີ້ແລ້ວ ພິຈາລະນາສັນຍາ ຄື ພິຈາລະນາໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນໂຣກ ເປັນເປັນຄືຫົວຝີ ເປັນເປັນຄືລູກສອນ ເປັນຂອງລຳບາກ ເປັນອາພາດ ເປັນຢ່າງອື່ນ ເປັນຂອງຊຸດໂຊມ ເປັນສະຫນຽດ ເປັນອຸປັດທະວະ ເປັນໄພ ເປັນອຸປະສັກ ເປັນຂອງຫວັ່ນໄຫວ ເປັນຂອງຜຸພັງ ຯລຯ ເປັນເຫດເກີດທຸກ ຕັ້ງຢູ່ບໍ່ໄດ້ ຫາຄວາມ ແຊ່ມຊື່ນບໍ່ໄດ້ ເປັນໂທດ ເປັນຂອງທີ່ຕ້ອງສະລັດອອກໄປ ນີ້ຊື່ວ່າຕີຣະນະປະ ຣິນຍາ

ປະຫານະປະຣິນຍາ ເປັນແນວໃດ?

ຄື ມຸນີເມື່ອພິຈາລະນາເຫັນແນວນີ້ ກໍຍ່ອມລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນສັນຍາ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມກຳໜັດດ້ວຍອຳນາດ ຄວາມພໍໃຈໃນສັນຍາ ສັນຍານັ້ນ ເມື່ອທ່ານທັງຫຼາຍລະໄດ້ເດັດຂາດແລ້ວແນວນີ້ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ນີ້ຊື່ວ່າປະຫານະປະຣິນຍາ

ຄຳວ່າ ກຳນົດຮູ້ສັນຍາແລ້ວ ໄດ້ແກ່ ກຳນົດຮູ້ສັນຍາດ້ວຍປະຣິນຍາ ໓ ຢ່າງ ເຫຼົ່ານີ້ແລ້ວ

ຄຳວ່າ ເພິ່ງຂ້າມໂອຄະໄດ້ ອະທິບາຍວ່າ ເພິ່ງຂ້າມ ຄື ຂ້າມໄປ ຂ້າມພົ້ນ ກ້າວລ່ວງລ່ວງເລີຍ ກາໂມຄະ (ຫ້ວງນ້ຳຄືກາມ) ພະໂວຄະ (ຫ້ວງນ້ຳຄືພົບ) ທິດໂຖຄະ (ຫ້ວງນ້ຳຄືທິດຖິ) ອະວິດໂຊຄະ (ຫ້ວງນ້ຳຄືອະວິດຊາ) ລວມຄວາມວ່າ ກຳນົດຮູ້ສັນຍາແລ້ວ ຯລຯ ເພິ່ງຂ້າມໂອຄະໄດ້

ຄຳວ່າ ມຸນີ ຯລຯ ບໍ່ເຂົ້າໄປຕິດໃນຄວາມຍຶດຖືທັງຫຼາຍ ອະທິບາຍວ່າ

ຄຳວ່າ ຄວາມຍຶດຖື ໄດ້ແກ່ ຄວາມຍຶດຖື ໒ ຢ່າງ ຄື (໑) ຄວາມຍຶດຖືດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດທິດຖິ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ໆລໆ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜູ້ທີ່ປະກອບດ້ວຍຍານນັ້ນ ຊື່ວ່າມຸນີ ຄື ຜູ້ບັນລຸໂມນະຍານແລ້ວ ໂມເນີຍະທຳ (ທຳທີ່ເຮັດໃຫ້ເປັນມຸນີ) ໓ ປະການ ຄື (໑) ໂມເນີຍະທຳທາງກາຍ (໒) ໂມເນີຍະທຳທາງວາຈາ (໓) ໂມເນີຍະທຳທາງໃຈ

ໂມເນີຍະທຳທາງກາຍ ເປັນແນວໃດ?

ຄື ການລະກາຍທຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍະທຳທາງກາຍ ກາຍສຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍະທຳທາງກາຍ ຍານມີກາຍເປັນອາລົມ ຊື່ວ່າໂມເນີຍະທຳທາງກາຍ ກາຍປະຣິນຍາ (ການກຳນົດຮູ້ກາຍ) ຊື່ວ່າໂມເນີຍະທຳທາງກາຍ ມັກທີ່ປະກອບດ້ວຍປະຣິນຍາ ຊື່ວ່າໂມເນີຍະທຳທາງກາຍ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ໃນກາຍ ຊື່ວ່າໂມເນີຍະທຳທາງກາຍ ຄວາມດັບແຫ່ງກາຍສັງຂານ ການບັນລຸຈະຕຸດຖະຊານ ຊື່ວ່າໂມເນີຍະທຳທາງກາຍ ນີ້ຊື່ວ່າໂມເນີຍະທຳທາງກາຍ

ໂມເນີຍະທຳທາງວາຈາ ເປັນແນວໃດ?

ຄື ການລະວະຈີທຸດຈະຣິດ ໔ ຢ່າງ ຊື່ວ່າໂມເນີຍະທຳທາງວາຈາ ວະຈີສຸດຈະຣິດ ໔ ຢ່າງ ຊື່ວ່າໂມເນີຍະທຳທາງວາຈາ ຍານມີວາຈາເປັນອາລົມ ຊື່ວ່າໂມເນີຍະທຳທາງວາຈາ ວາຈາປະຣິນຍາ (ການກຳນົດຮູ້ວາຈາ) ຊື່ວ່າໂມເນີຍະທຳທາງວາຈາ ມັກທີ່ປະກອບດ້ວຍປະຣິນຍາ ຊື່ວ່າໂມເນີຍະທຳທາງວາຈາ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນ ວາຈາ ຊື່ວ່າໂມເນີຍະທຳທາງວາຈາ ຄວາມດັບແຫ່ງວະຈີສັງຂານ ການບັນລຸທຸຕິຍະຊານ ຊື່ວ່າໂມເນີຍະທຳທາງວາຈາ ນີ້ຊື່ວ່າໂມເນີຍະທຳທາງວາຈາ

ໂມເນີຍະທຳທາງໃຈ ເປັນແນວໃດ?

ຄື ການລະມະໂນທຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍະທຳທາງໃຈ ມະໂນສຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍະທຳທາງໃຈ ຍານມີໃຈເປັນອາລົມ ຊື່ວ່າໂມເນີຍະທຳທາງໃຈ ຈິດຕະ-ປະຣິນຍາ (ການກຳນົດຮູ້ຈິດ) ຊື່ວ່າໂມເນີຍະທຳທາງໃຈ ມັກທີ່ປະກອບດ້ວຍປະຣິນຍາ ຊື່ວ່າໂມເນີຍະທຳທາງໃຈ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຈິດ ຊື່ວ່າ

ໂມເນີຍະທຳທາງໃຈ ຄວາມດັບແຫ່ງຈິດຕະສັງຂານ ການບັນລຸສັນຍາເວທະຍິຕະນິໂຣດ ຊື່ວ່າໂມເນີຍະທຳທາງໃຈ ນີ້ຊື່ວ່າໂມເນີຍະທຳທາງໃຈ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ບັນດິດທັງຫຼາຍ ຮຽກບຸກຄົນຜູ້ເປັນມຸນີທາງກາຍ
ເປັນມຸນີທາງວາຈາ ເປັນມຸນີທາງໃຈ ຜູ້ບໍ່ມີອາສະວະ
ວ່າເປັນມຸນີຜູ້ສົມບູນດ້ວຍໂມເນີຍະທຳ ລະກິເລດທັງປວງໄດ້

> ບັນດິດທັງຫຼາຍ ຮຽກບຸກຄົນຜູ້ເປັນມຸນີທາງກາຍ
> ເປັນມຸນີທາງວາຈາ ເປັນມຸນີທາງໃຈ ຜູ້ບໍ່ມີອາສະວະ
> ວ່າເປັນມຸນີຜູ້ສົມບູນດ້ວຍໂມເນີຍຍະທຳ ລ້າງບາບໄດ້ແລ້ວ

ມຸນີຜູ້ປະກອບດ້ວຍໂມເນີຍຍະທຳ ໓ ປະການເຫຼົ່ານີ້ ມີ ໖ ຈຳພວກ ຄື (໑) ອາຄາຣະມຸນີ (໒) ອະນາຄາຣະມຸນີ (໓) ເສຂະມຸນີ (໔) ອະເສຂະມຸນີ (໕) ປັດເຈກມຸນີ (໖) ມຸນີມຸນີ

ອາຄາຣະມຸນີ ເປັນແນວໃດ?

ຄື ບຸກຄົນຜູ້ຄອງເຮືອນ ເຫັນທາງ (ນິບພານ) ແລ້ວ ຮູ້ແຈ້ງຫຼັກຄຳສອນແລ້ວເຫຼົ່ານີ້ ຊື່ວ່າອາຄາຣະມຸນີ

ອະນາຄາຣະມຸນີ ເປັນແນວໃດ?

ຄື ບຸກຄົນຜູ້ເປັນບັນພະຊິດ ເຫັນທາງ (ນິບພານ) ແລ້ວ ຮູ້ແຈ້ງຫຼັກຄຳສອນແລ້ວ ເຫຼົ່ານີ້ ຊື່ວ່າອະນາຄາຣະມຸນີ

ພຣະເສຂະ ໗ ຈຳພວກ ຊື່ວ່າເສຂະມຸນີ

ພຣະອະຣະຫັນທັງຫຼາຍ ຊື່ວ່າອະເສຂະມຸນີ

ພຣະປັດເຈກພຸດທະເຈົ້າທັງຫຼາຍ ຊື່ວ່າປັດເຈກມຸນີ

ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າທັງຫຼາຍ ຕັດຮຽກວ່າມຸນີມຸນີ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

> ບຸກຄົນໂງ່ຈ້າບໍ່ຮູ້ອັນໃດ ພຽງແຕ່ນັ່ງນິ່ງ ໆ ບໍ່ຊື່ວ່າເປັນມຸນີ
> ສ່ວນບຸກຄົນຜູ້ສະຫຼາດ ເລືອກຊັ່ງເອົາແຕ່ສິ່ງທີ່ດີ ລະຖິ້ມສິ່ງທີ່ຊົ່ວ
> ເໝືອນບຸກຄົນຊັ່ງສິ່ງຂອງ ຈຶ່ງຈະຊື່ວ່າເປັນມຸນີແທ້
> ຜູ້ທີ່ຮູ້ໂລກທັງ ໒ ກໍຮຽກວ່າ ເປັນມຸນີ (ເຊັ່ນກັນ)
> ຜູ້ຮູ້ທຳທັງຂອງອະສັດຕະບຸຣຸດແລະສັດຕະບຸຣຸດ
> ທັງພາຍໃນແລະພາຍນອກ ໃນໂລກທັງປວງ
> ເທວະດາແລະມະນຸດບູຊາແລ້ວ ກ້າວລ່ວງກິເລດເຄື່ອງຂ້ອງ
> ແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ຄວາມຕິດ ໄດ້ແກ່ ຄວາມຕິດ ໒ ຢ່າງ ຄື (໑) ຄວາມຕິດດ້ວຍອຳນາດຕັນຫາ (໒) ຄວາມຕິດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຕິດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມ ຕິດດ້ວຍອຳນາດທິດຖິ

ມຸນີລະຄວາມຕິດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຕິດດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ຕິດ ຄື ບໍ່ຕິດພັນ ບໍ່ເຂົ້າໄປຕິດໃນຄວາມຍຶດຖືທັງຫຼາຍ ຄື ເປັນຜູ້ບໍ່ຕິດແລ້ວ ບໍ່ຕິດພັນແລ້ວ ບໍ່ເຂົ້າໄປຕິດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ (ຈາກຄວາມຕິດ) ຢູ່ ລວມຄວາມວ່າ ມຸນີບໍ່ເຂົ້າໄປຕິດໃນຄວາມຍຶດຖື ທັງຫຼາຍ

ຄຳວ່າ ຖອນລູກສອນໄດ້ແລ້ວ ບໍ່ຜະໝາດ ປະພຶດຢູ່ ອະທິບາຍວ່າ

ຄຳວ່າ ລູກສອນ ໄດ້ແກ່ ລູກສອນ ໗ ຊະນິດ ຄື (໑) ລູກສອນຄືຣາຄະ (໒) ລູກສອນຄືໂທສະ (໓) ລູກສອນຄືໂມຫະ (໔) ລູກສອນຄືມານະ (໕) ລູກສອນຄືທິດຖິ (໖) ລູກສອນຄືໂສກະ (໗) ລູກສອນຄືຄວາມສົງໄສ

ລູກສອນເຫຼົ່ານັ້ນຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ຖອນລູກສອນໄດ້ແລ້ວ ຄື ຖອນລູກສອນອອກແລ້ວ ດຶງລູກສອນຂຶ້ນແລ້ວ ດຶງລູກສອນອອກແລ້ວ ຖົກລູກສອນອອກແລ້ວ ຖິ້ມລູກສອນອອກແລ້ວ ສະລະລູກສອນແລ້ວ ຄາຍລູກສອນແລ້ວ ປ່ອຍລູກສອນແລ້ວ ລະລູກສອນແລ້ວ ສະລັດຖິ້ມລູກສອນແລ້ວ ເປັນຜູ້ໝົດຄວາມຢາກດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມ ຄວາມວ່າ ຖອນລູກສອນໄດ້ແລ້ວ

ຄຳວ່າ ປະພຶດຢູ່ ໄດ້ແກ່ ປະພຶດຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປຍັງຊີວິດໃຫ້ດຳເນີນໄປວ່າດ້ວຍຄວາມບໍ່ຜະໝາດ

ຄຳວ່າ ບໍ່ຜະໝາດ ອະທິບາຍວ່າ ຜູ້ເຮັດດ້ວຍຄວາມເອື້ອເຟື້ອ ເຮັດຕິດຕໍ່ ເຮັດບໍ່ຢຸດປະພຶດບໍ່ທໍ້ຖອຍ ບໍ່ລະຄວາມພໍໃຈ ບໍ່ຖິ້ມເບົາ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ

ຄື ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມບໍ່ຖອຍກັບສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາເພິ່ງເຮັດສີນຂັນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາສີນຂັນທີ່ບໍລິບູນໃນຂໍ້ນັ້ນ ໆ ໂດຍອຸບາຍແນວໃດ ດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ຯລຯ ວ່າເຮົາເພິ່ງເຮັດສະມາທິຂັນ ທີ່ຍັງບໍ່ບໍລິບູນໃຫ້ບໍລິບູນໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາສະມາທິຂັນທີ່ບໍລິບູນໃນຂໍ້ນັ້ນໆ ໂດຍອຸບາຍແນວໃດ ດັ່ງນີ້ ຯລຯ ວ່າເຮົາເພິ່ງເຮັດປັນຍາຂັນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາປັນຍາຂັນທີ່ບໍລິບູນໃນຂໍ້ນັ້ນ ໆ ໂດຍອຸບາຍແນວໃດ ດັ່ງນີ້ ຯລຯ ວ່າເຮົາເພິ່ງເຮັດວິມຸດຕິຂັນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາວິມຸດຕິຂັນໃນຂໍ້ນັ້ນ ໆ ໂດຍອຸບາຍຢ່າງໃດ ດັ່ງນີ້ ຯລຯ ຄື ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມບໍ່ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ

ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາເພິ່ງເຮັດວິມຸດຕິຍານທັດສະນະຂັນທີ່ຍັງບໍ່ບໍລິບູນ ໃຫ້ບໍລິບູນໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາວິມຸດຕິຍານທັດສະນະຂັນທີ່ບໍລິບູນໃນຂໍ້ນັ້ນ ໆ ໂດຍອຸບາຍແນວໃດ ດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທໍາທັງຫຼາຍ ຄື ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມບໍ່ຖອຍກັບ ສະຕິສໍາປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາເພິ່ງກໍານົດຮູ້ທຸກທີ່ຍັງບໍ່ໄດ້ ກໍານົດຮູ້ ເພິ່ງລະກິເລດທີ່ຍັງບໍ່ໄດ້ລະ ເພິ່ງຈະເລີນມັກທີ່ຍັງບໍ່ໄດ້ຈະເລີນ ຫຼື ເພິ່ງເຮັດໃຫ້ແຈ້ງນິໂຣດທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງໂດຍອຸບາຍແນວໃດດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທໍາ ທັງຫຼາຍ ລວມຄວາມວ່າ ຖອນລູກສອນໄດ້ແລ້ວ ບໍ່ຜະໝາດ ປະພຶດຢູ່

ຄໍາວ່າ ຍ່ອມບໍ່ຫວັງໂລກນີ້ແລະໂລກໜ້າ ອະທິບາຍວ່າ ບໍ່ຫວັງໂລກນີ້ ຄືອັດຕະພາບຂອງຕົນ ບໍ່ຫວັງໂລກໜ້າ ຄື ອັດຕະພາບຂອງຜູ້ອື່ນ ບໍ່ຫວັງໂລກນີ້ ຄື ຮູບ ເວທະນາ ສັນຍາສັງຂານ ແລະວິນຍານຂອງຕົນ ບໍ່ຫວັງໂລກໜ້າ ຄື ຮູບ ເວທະນາ ສັນຍາ ສັງຂານ ແລະວິນຍານຂອງຜູ້ອື່ນ ບໍ່ຫວັງໂລກນີ້ ຄື ອາຍະຕະນະພາຍໃນ ໖ ບໍ່ຫວັງໂລກໜ້າ ຄື ອາຍະຕະນະພາຍນອກ ໖ ບໍ່ຫວັງໂລກນີ້ ຄື ມະນຸດໂລກ ບໍ່ຫວັງໂລກໜ້າ ຄື ເທວະໂລກ ບໍ່ຫວັງໂລກນີ້ ຄືກາມທາດ ບໍ່ຫວັງໂລກໜ້າ ຄື ຮູບທາດ ອະຮູບທາດ ບໍ່ຫວັງໂລກນີ້ ຄື ກາມທາດ ຮູບທາດ ບໍ່ຫວັງໂລກໜ້າ ຄື ອະຮູບທາດ ບໍ່ຫວັງ ຄື ບໍ່ຕ້ອງການ ບໍ່ຍິນດີ ບໍ່ປາຖະໜາ ບໍ່ມຸ້ງໝາຍ ບໍ່ມຸ້ງຫວັງຄະຕິ ການຖືກໍາເນີດ ປະຕິສົນທິ ພົບ ສົງສານ ຫຼື ວັດຕະຕໍ່ໄປ ລວມຄວາມວ່າ ຍ່ອມບໍ່ຫວັງໂລກນີ້ແລະໂລກໜ້າ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີກໍານົດຮູ້ສັນຍາແລ້ວ ບໍ່ເຂົ້າໄປຕິດໃນຄວາມຢຶດຖືທັງຫຼາຍ
ເພິ່ງຂ້າມໂອຄະໄດ້ ຖອນລູກສອນໄດ້ແລ້ວ ບໍ່ຜະໝາດ
ປະພຶດຢູ່ ຍ່ອມບໍ່ຫວັງໂລກນີ້ ແລະໂລກໜ້າ

**ຄຸຫັດຖະກະສຸດຕະນິດເທດທີ ໘ ຈົບ**

# ៣. ທຸດຖັດຖະກະສຸດຕະ ນິດເທດ

## ອະທິບາຍທຸດຖັດຖະກະສູດ

### ວ່າດ້ວຍເດຍຣະຖີປະທຸດສະຮ້າຍມຸນີ

ພຣະສາຣີບຸດເຖຣະຈະກ່າວອະທິບາຍທຸດຖັດຖະກະສູດ ດັ່ງຕໍ່ໄປນີ້

[໑໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເດຍຣະຖີບາງພວກມີໃຈຊົ່ວກ່າວຮ້າຍ
ບຸກຄົນເຫຼົ່າອື່ນເຂົ້າໃຈວ່າຈິງ ກໍກ່າວຮ້າຍດ້ວຍ
ແຕ່ມຸນີບໍ່ໃສ່ໃຈຄໍາກ່າວຮ້າຍທີ່ເກີດຂຶ້ນ
ຍ້ອນເຫດນັ້ນ ມຸນີຈຶ່ງບໍ່ມີກິເລດເຄື່ອງຕຶງຈິດໃນບ່ອນໃດ ໆ

ຄໍາວ່າ ເດຍຣະຖີບາງພວກມີໃຈຊົ່ວກ່າວຮ້າຍ ອະທິບາຍວ່າ ເດຍຣະຖີເຫຼົ່ານັ້ນ ມີໃຈຊົ່ວ ຄືມີໃຈຮ້າຍ ມີໃຈເຫັນຜິດ ມີໃຈຫຼົງຜິດ ມີໃຈຂຸ່ນ ມີໃຈຂຸ່ນເຄືອງ ມີໃຈອາຄາດ ມີໃຈອາຄາດແຄ້ນ ກ່າວຮ້າຍ ຄື ກ່າວຕິຕຽນພຣະຜູ້ມີພຣະພາກເຈົ້າ ແລະພິກຂຸສົງດ້ວຍ ເລື້ອງບໍ່ຈິງ ລວມຄວາມວ່າ ເດຍຣະຖີບາງພວກມີໃຈຊົ່ວກ່າວຮ້າຍ

ຄໍາວ່າ ບຸກຄົນເຫຼົ່າອື່ນເຂົ້າໃຈວ່າຈິງ ກໍກ່າວຮ້າຍດ້ວຍ ອະທິບາຍວ່າ ພວກຄົນທີ່ເຊື່ອຖືເດຍຣະຖີເຫຼົ່ານັ້ນ ກໍານົດ ນ້ອມໃຈເຊື່ອ ເຂົ້າໃຈວ່າຈິງ ສໍາຄັນວ່າຈິງ ເຂົ້າໃຈວ່າເປັນຈິງ ສໍາຄັນວ່າເປັນຈິງ ເຂົ້າໃຈວ່າເປັນເຊັ່ນນັ້ນ ສໍາຄັນວ່າເປັນເຊັ່ນນັ້ນ ເຂົ້າໃຈວ່າ ຈິງແທ້ ສໍາຄັນວ່າຈິງແທ້ ເຂົ້າໃຈວ່າບໍ່ຜິດ ສໍາຄັນວ່າບໍ່ຜິດ ຈຶ່ງກ່າວຮ້າຍ ຄື ກ່າວ ຕິຕຽນພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງດ້ວຍເລື້ອງບໍ່ຈິງ ລວມຄວາມວ່າ ບຸກຄົນເຫຼົ່າອື່ນເຂົ້າໃຈວ່າຈິງ ກໍກ່າວຮ້າຍດ້ວຍ

ຄໍາວ່າ ແຕ່ມຸນີບໍ່ໃສ່ໃຈຄໍາກ່າວຮ້າຍທີ່ເກີດຂຶ້ນ ອະທິບາຍວ່າ ຄໍາກ່າວຮ້າຍນັ້ນ ເກີດແລ້ວ ຄື ເກີດຂຶ້ນແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວ ໄດ້ແກ່ ສຽງປະກາດຈາກບຸກຄົນອື່ນ ຄໍາດ່າ ຄໍາຕິຕຽນພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງດ້ວຍເລື້ອງ ບໍ່ຈິງ ລວມຄວາມວ່າ ຄໍາກ່າວຮ້າຍທີ່ເກີດຂຶ້ນ

ຄໍາວ່າ ມຸນີ ໃນຄໍາວ່າ ມຸນີບໍ່ໃສ່ໃຈ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທໍາ ສໍາມາທິດຖິ ຜູ້ທີ່ປະກອບດ້ວຍຍານນັ້ນ ຊື່ວ່າມຸນີ ຄື ຜູ້ບັນລຸໂມນະຍານ ຯລຯ ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາ

ເປັນຄືຕາໜ່າງແລ້ວ ຜູ້ນັ້ນຊື່ວ່າມຸນີ ຜູ້ໃດໃສ່ໃຈຄຳກ່າວຮ້າຍ ຜູ້ນັ້ນກໍໃສ່ໃຈຄຳກ່າວຮ້າຍ ດ້ວຍເຫດ ໒ ຢ່າງ ຄື

໑. ຜູ້ກ່າວຮ້າຍ ຍ່ອມໃສ່ໃຈຄຳວ່າ ຮ້າຍ ຍ້ອນຕົນເອງເປັນຜູ້ກ່າວຮ້າຍ

໒. ຜູ້ຖືກເຂົາກ່າວຮ້າຍ ຖືກເຂົາກ່າວຕິຕຽນ ຍ່ອມໂກດ ພະຍາບາດຕອບໂຕ້ ທຳຄວາມໂກດ ຄວາມເຄືອງ ຄວາມຊິງຊັງໃຫ້ຜາກົດວ່າ ເຮົາບໍ່ແມ່ນຜູ້ເວົ້າ ຜູ້ໃດໃສ່ໃຈຄຳກ່າວຮ້າຍ ຜູ້ນັ້ນກໍຍ່ອມໃສ່ໃຈຄຳກ່າວຮ້າຍ ດ້ວຍເຫດ ໒ ຢ່າງເຫຼົ່ານີ້

ມຸນີບໍ່ໃສ່ໃຈຄຳກ່າວຮ້າຍ ດ້ວຍເຫດ ໒ ຢ່າງ ຄື

໑. ມຸນີຜູ້ບໍ່ກ່າວຮ້າຍ ຍ່ອມບໍ່ໃສ່ໃຈຄຳກ່າວຮ້າຍ ຍ້ອນຕົນເອງບໍ່ແມ່ນເປັນຜູ້ກ່າວ ຮ້າຍ

໒. ມຸນີຜູ້ຖືກເຂົາກ່າວຮ້າຍ ຖືກເຂົາຕິຕຽນ ກໍຍ່ອມບໍ່ໂກດ ບໍ່ພະຍາບາດ ບໍ່ຕອບໂຕ້ ບໍ່ເຮັດຄວາມໂກດ ຄວາມເຄືອງ ຄວາມຊິງຊັງໃຫ້ຜາກົດວ່າ ເຮົາບໍ່ແມ່ນຜູ້ເວົ້າ ມຸນີບໍ່ໃສ່ໃຈ ຄື ບໍ່ສົນໃຈ ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນຄຳກ່າວຮ້າຍ ດ້ວຍເຫດ ໒ ຢ່າງເຫຼົ່ານີ້

ລວມຄວາມວ່າ ແຕ່ມຸນີບໍ່ໃສ່ໃຈຄຳກ່າວຮ້າຍທີ່ເກີດຂຶ້ນ

## ວ່າດ້ວຍກິເລດເຄື່ອງຕຶງຈິດ ໓ ປະການ

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ມຸນີຈຶ່ງບໍ່ມີກິເລດເຄື່ອງຕຶງຈິດໃນບ່ອນໃດ ໆ ໄດ້ແກ່ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ພາວະທີ່ມີຈິດຖືກໂທສະກະທົບກໍດີ ມີກິເລດເຄື່ອງຕຶງຈິດເກີດຂຶ້ນກໍດີ ບໍ່ມີແກ່ມຸນີ ກິເລດເຄື່ອງຕຶງຈິດ ๕ ຢ່າງກໍດີ ກິເລດເຄື່ອງຕຶງຈິດ ໓ ຢ່າງ ຄື (໑) ຣາຄະ (໒) ໂທສະ (໓) ໂມຫະກໍດີ ຈຶ່ງບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ຄື ກິເລດເຄື່ອງ ຕຶງຈິດນັ້ນ ມຸນີລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ

ຄຳວ່າ ໃນບ່ອນໃດ ໆ ໄດ້ແກ່ ໃນບ່ອນໃດ ຄື ບ່ອນໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ ລວມຄວາມວ່າ ຍ້ອນເຫດນັ້ນ ມຸນີຈຶ່ງບໍ່ມີກິເລດເຄື່ອງຕຶງຈິດໃນບ່ອນໃດ ໆ ດ້ວຍເຫດນັ້ນ ພຣະຜູ້ມີພາກເຈົ້າຈຶ່ງຕັດວ່າ

ເດຍຣະຖີບາງຈຳພວກມີໃຈຊົ່ວກ່າວຮ້າຍ
ບຸກຄົນເຫຼົ່າອື່ນເຂົ້າໃຈວ່າຈິງ ກໍກ່າວຮ້າຍດ້ວຍ
ແຕ່ມຸນີບໍ່ໃສ່ໃຈຄຳກ່າວຮ້າຍທີ່ເກີດຂຶ້ນ
ຍ້ອນເຫດນັ້ນ ມຸນີຈຶ່ງບໍ່ມີກິເລດເຄື່ອງຕຶງຈິດໃນບ່ອນໃດ ໆ

[໑໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຜູ້ໄປຕາມຄວາມພໍໃຈ ຕັ້ງຢູ່ໃນຄວາມພໍໃຈ
ເພິ່ງກ້າວລ່ວງທິດຖິຂອງຕົນໄດ້ແນວໃດນໍ
ແຕ່ເມື່ອເຮັດຕົນໃຫ້ພຽບພ້ອມ ຮູ້ແນວໃດກໍເພິ່ງເວົ້າຢ່າງນັ້ນ

## ວ່າດ້ວຍທິດຖິ

ຄຳວ່າ ເພິ່ງກ້າວລ່ວງທິດຖິຂອງຕົນໄດ້ແນວໃດນໍ ອະທິບາຍວ່າ ເດຍຣະຖີ ມີທິດຖິ ຢ່າງນີ້ ມີຄວາມພໍໃຈ ມີຄວາມຖືກໃຈ ມີລັດທິ ມີອັດທະຍາໄສ ມີຄວາມປະສົງແນວນີ້ວ່າ ພວກເຮົາຂ້ານາງສຸນທະຣີປະຣິພາຊິກາແລ້ວ ປະກາດໂທດພວກສະມະນະສາກະຍະບຸດ ກໍຈັກເອົາ ລາບຍົດ ສັກກາຣະແລະສຳມານະກັບຄືນມາໄດ້ດ້ວຍວິທີການແນວນີ້ ພວກເດຍຣະຖີເຫຼົ່ານັ້ນບໍ່ສາມາດກ້າວລ່ວງທິດຖິ ຄວາມພໍໃຈ ຄວາມຖືກໃຈ ລັດທິ ອັດທະຍາໄສ ຄວາມປະສົງຂອງຕົນໄດ້ ໂດຍທີ່ແທ້ຄວາມເສື່ອມຍົດນັ້ນຈະກັບຍ້ອນມາຫາເດຍຣະຖີເຫຼົ່ານັ້ນ ລວມຄວາມວ່າ ເພິ່ງກ້າວລ່ວງທິດຖິຂອງຕົນໄດ້ແນວໃດນໍ ແນວນີ້ແດ່

ອີກໄນໜຶ່ງ ຜູ້ທີ່ມີວາທະແນວນີ້ວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ເພິ່ງລ່ວງ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນທິດຖິ ຄວາມພໍໃຈ ຄວາມຖືກໃຈ ລັດທິ ອັດທະຍາໄສ ຄວາມປະສົງຂອງຕົນໄດ້ແນວໃດ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນເຂົາສະມາທານ ຖື ຍຶດໝັ້ນ ຖືໝັ້ນ ຕິດໃຈ ນ້ອມໃຈເຊື່ອທິດຖິນັ້ນ ໃຫ້ພຽບພ້ອມຢ່າງນັ້ນ ລວມຄວາມວ່າ ເພິ່ງກ້າວລ່ວງທິດຖິຂອງຕົນໄດ້ແນວໃດນໍ ແນວນີ້ແດ່

ອີກໄນໜຶ່ງ ຜູ້ມີວາທະແນວນີ້ວ່າ ໂລກບໍ່ທ່ຽງ ฯລฯ ໂລກມີທີ່ສຸດ ฯລฯ ໂລກບໍ່ມີທີ່ສຸດ ฯລฯ ຊີວະກັບສະຣີຣະເປັນຢ່າງດຽວກັນ ฯລฯ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ[๑] ເພິ່ງລ່ວງ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນ ທິດຖິ ຄວາມຖືກໃຈ ຄວາມພໍໃຈ ລັດທິ ອັດທະຍາໄສ ຄວາມປະສົງຂອງຕົນໄດ້ແນວໃດນໍ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາສະມາທານ ຖື ຍຶດໝັ້ນ ຖືໝັ້ນ ຕິດໃຈ ນ້ອມໃຈເຊື່ອທິດຖິນັ້ນ ໃຫ້ພຽບພ້ອມແນວນັ້ນ ລວມຄວາມວ່າ ເພິ່ງກ້າວລ່ວງທິດຖິຂອງຕົນໄດ້ແນວໃດນໍ ແນວນີ້ແດ່

ຄຳວ່າ ຜູ້ໄປຕາມຄວາມພໍໃຈ ໃນຄຳວ່າ ຜູ້ໄປຕາມຄວາມພໍໃຈ ຕັ້ງຢູ່ໃນຄວາມພໍໃຈ ອະທິບາຍວ່າ ຜູ້ນັ້ນຍ່ອມໄປ ອອກໄປ ຖືກພາໄປ ຖືກນຳໄປ ດ້ວຍທິດຖິຂອງຕົນ ຄວາມພໍໃຈ

ຂອງຕົນ ຄວາມຖືກໃຈຂອງຕົນ ລັດທິຂອງຕົນ ໄດ້ແກ່ ຜູ້ນັ້ນຍ່ອມໄປ ອອກໄປ ຖືກພາໄປ ຖືກນຳໄປດ້ວຍທິດຖິຂອງຕົນ ຄວາມພໍໃຈຂອງຕົນ ຄວາມຖືກໃຈຂອງຕົນ ລັດທິຂອງຕົນ ເໝືອນມະນຸດຍ່ອມໄປ ອອກໄປ ຖືກພາໄປ ຖືກນຳໄປ ດ້ວຍຍານພາຫະນະ ຄື ຊ້າງ ລົດ ມ້າ ງົວ ແບ້ ແກະ ອູດ ຫຼືລາ ສະນັ້ນ ລວມຄວາມວ່າ ຜູ້ໄປຕາມຄວາມພໍໃຈ

ຄຳວ່າ ຕັ້ງຢູ່ໃນຄວາມພໍໃຈ ໄດ້ແກ່ ຕັ້ງຢູ່ ຄື ຕັ້ງໝັ້ນ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອໃນທິດຖິຂອງຕົນ ຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ ລວມຄວາມວ່າ ຜູ້ໄປຕາມຄວາມພໍໃຈ ຕັ້ງຢູ່ໃນຄວາມພໍໃຈ

ຄຳວ່າ ເມື່ອເຮັດຕົນໃຫ້ພຽບພ້ອມ ໄດ້ແກ່ ເຮັດຕົນໃຫ້ພຽບພ້ອມ ຄື ເຮັດໃຫ້ບໍລິບູນ ບໍ່ໃຫ້ຂາດ ໃຫ້ເລີດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ອະທິບາຍວ່າ ເຮັດຕົນໃຫ້ພຽບພ້ອມ ບໍລິບູນ ບໍ່ໃຫ້ຂາດ ໃຫ້ເລີດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ຄື ເຮັດທັດສະນະນັ້ນໃຫ້ເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນວ່າ ພຣະສາດສະດາພຣະອົງນີ້ເປັນສັບພັນຍູ ພຣະທຳນີ້ພຣະຜູ້ມີພຣະພາກເຈົ້າຕັດສອນໄວ້ດີແລ້ວ ໝູ່ຄະນະ (ສົງ) ນີ້ປະຕິບັດດີແລ້ວ ທິດຖິນີ້ເປັນສິ່ງທີ່ຈະເລີນ ປະຕິປະທານີ້ຊົງບັນຍັດໄວ້ດີແລ້ວ ມັກ ນີ້ເປັນທາງນຳອອກຈາກທຸກ ລວມຄວາມວ່າ ເມື່ອເຮັດຕົນໃຫ້ພຽບພ້ອມ

ຄຳວ່າ ຮູ້ແນວໃດກໍເພິ່ງເວົ້າແນວນັ້ນ ອະທິບາຍວ່າ ຮູ້ແນວໃດກໍເພິ່ງເວົ້າ ຄື ກ່າວ ບອກ ສະແດງ ຊີ້ແຈ່ງແນວນັ້ນວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຯລຯ ໂລກບໍ່ທ່ຽງ ຯລຯ ຮູ້ແນວໃດກໍເພິ່ງເວົ້າ ຄື ກ່າວ ບອກ ສະແດງ ຊີ້ແຈ່ງແນວນັ້ນວ່າ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນ ເປັນໂມຄະ ລວມຄວາມວ່າ ຮູ້ແນວໃດກໍເພິ່ງເວົ້າແນວນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຜູ້ໄປຕາມຄວາມພໍໃຈ ຕັ້ງຢູ່ໃນຄວາມພໍໃຈ
ເພິ່ງກ້າວລ່ວງທິດຖິຂອງຕົນໄດ້ແນວໃດນໍ
ແຕ່ເມື່ອເຮັດຕົນໃຫ້ພຽບພ້ອມ ຮູ້ແນວໃດກໍເພິ່ງເວົ້າແນວນັ້ນ

[໑໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສັດເກີດໃດບໍ່ມີໃຜຖາມ
ກໍບອກສີນະວັດຂອງຕົນແກ່ບຸກຄົນເຫຼົ່າອື່ນ
ສັດເກີດໃດກ່າວເຖິງຕົນເອງເທົ່ານັ້ນ
ຜູ້ສະຫຼາດທັງຫຼາຍຮຽກສັດເກີດນັ້ນວ່າ ຜູ້ບໍ່ມີອະຣິຍະທຳ

ຄຳວ່າ ໃດ ໃນຄຳວ່າ ສັດເກີດໃດ ໆລໆ ສີນແລະຂໍ້ວັດຂອງຕົນ ໄດ້ແກ່ ຜູ້ໃດ ຄື ຜູ້ເຊັ່ນໃດ ຜູ້ຂວນຂວາຍແນວໃດ ຜູ້ຕັ້ງໃຈແນວໃດ ຜູ້ມີປະການແນວໃດ ຜູ້ເຖິງຖານະໃດ ຜູ້ປະກອບດ້ວຍທຳໃດ ຈະເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດກໍຕາມ

## ວ່າດ້ວຍສີນແລະຂໍ້ວັດ

ຄຳວ່າ ສີນແລະຂໍ້ວັດ ໄດ້ແກ່ ສີນແລະຂໍ້ວັດກໍມີ ຂໍ້ວັດບໍ່ແມ່ນສີນກໍມີ

ສີນແລະຂໍ້ວັດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ຄວາມສັງລວມ ຄວາມສັງວອນ ການບໍ່ລ່ວງລະເມີດໃນສິກຂາບົດເຫຼົ່ານັ້ນ ຊື່ວ່າສີນການສະມາທານ ຊື່ວ່າຂໍ້ວັດ ຊື່ວ່າສີນຍ້ອນມີຄວາມໝາຍວ່າ ສັງວອນ ຊື່ວ່າຂໍ້ວັດຍ້ອນມີຄວາມໝາຍວ່າສະມາທານ ນີ້ຕັດຮຽກວ່າສີນແລະຂໍ້ວັດ

ຂໍ້ວັດ ບໍ່ແມ່ນສີນ ເປັນແນວໃດ?

ຄື ທຸດົງ ໑໓ ຂໍ້ ໄດ້ແກ່

| | |
|---|---|
| ໑. ອາຣັນຍິກັງຄະທຸດົງ | (ສະມາທານການຢູ່ປ່າເປັນຂໍ້ວັດ) |
| ໒. ປິນດະປາຕິກັງຄະທຸດົງ | (ສະມາທານການທ່ຽວບິນທະບາດເປັນຂໍ້ວັດ) |
| ໓. ປັງສຸກູລິກັງຄະທຸດົງ | (ສະມາທານການນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດ) |
| ໔. ເຕຈີວະຣິກັງຄະທຸດົງ | (ສະມາທານການຊົງໄຕຣຈີວອນເປັນຂໍ້ວັດ) |
| ໕. ສະປະທານະຈາຣີກັງຄະທຸດົງ | (ສະມາທານການທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດ) |
| ໖. ຂະລຸປັດສາພັດຕິກັງຄະທຸດົງ | (ສະມາທານການງົດສັນອາຫານຄາບຫຼັງເປັນຂໍ້ວັດ) |
| ໗. ເນສັດຊິກັງຄະທຸດົງ | (ສະມາທານການນັ່ງເປັນຂໍ້ວັດ) |
| ໑໓. ຍະຖາສັນຖະຕິກັງຄະທຸດົງ | (ສະມາທານການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດ) |

ນີ້ຮຽກວ່າຂໍ້ວັດ ບໍ່ແມ່ນສີນ ແມ່ນການສະມາທານຄວາມພຽນກໍຮຽກວ່າ ຂໍ້ວັດ ບໍ່ແມ່ນສີນ ພິກຂຸປະຄອງຈິດມຸ້ງໝັ້ນວ່າ ຊີ້ນແລະເລືອດໃນຮ່າງກາຍຈົ່ງເຫືອດແຫ້ງໄປ ຈະເຫຼືອຢູ່ແຕ່ໜັງເອັນ ແລະກະດູກກໍຕາມ ຜົນໃດເພິ່ງບັນລຸໄດ້ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍກຳລັງຂອງບຸຣຸດ

ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມສູ້ຊົນຂອງບຸຣຸດ (ຖ້າ) ຍັງບໍ່ບັນລຸຜົນນັ້ນແລ້ວກໍຈັກບໍ່ຢຸດຄວາມພຽນ ແມ່ນການສະມາທານຄວາມພຽນແນວນີ້ກໍຮຽກວ່າ ຂໍ້ວັດ ບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ

> ເມື່ອເຮົາຍັງຖອນລູກສອນຄືຕັນຫາຂຶ້ນບໍ່ໄດ້
> ເຮົາຈະບໍ່ກິນ ບໍ່ດື່ມ ບໍ່ອອກໄປຈາກວິຫານ
> ທັງຈະບໍ່ເອນກາຍນອນ

ການສະມາທານຄວາມພຽນແນວນີ້ກໍຮຽກວ່າ ຂໍ້ວັດ ບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ຕາບໃດທີ່ຈິດຂອງເຮົາຍັງບໍ່ຫຼຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຢຶດໝັ້ນ ຕາບນັ້ນເຮົາກໍຈັກບໍ່ທຳລາຍບັນລັງນີ້ ແມ່ນການສະມາທານຄວາມພຽນແນວນີ້ກໍຮຽກວ່າ ຂໍ້ວັດ ບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ຕາບໃດທີ່ຈິດຂອງເຮົາຍັງບໍ່ຫຼຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຢຶດໝັ້ນ ຕາບນັ້ນເຮົາກໍຈັກບໍ່ລຸກຈາກບ່ອນນັ່ງນີ້ ບໍ່ລົງຈາກລານຈົງກົມ ບໍ່ອອກຈາກວິຫານ ບໍ່ອອກຈາກເຮືອນຫຼັງຄາດ້ານດຽວ ບໍ່ອອກຈາກຜາສາດ ບໍ່ອອກຈາກເຮືອນໂລ້ນ ບໍ່ອອກຈາກຖ້ຳ ບໍ່ອອກຈາກບ່ອນຫຼີບຫຼີກ ບໍ່ອອກຈາກກຸດຕິ ບໍ່ອອກຈາກເຮືອນຍອດ ບໍ່ອອກຈາກປ້ອມ ບໍ່ອອກຈາກໂຮງກົມ ບໍ່ອອກຈາກເຮືອນທີ່ມີເຄື່ອງກັ້ນ ບໍ່ອອກຈາກສາລາທີ່ບຳຣຸງ ບໍ່ອອກຈາກມົນດົບ ບໍ່ອອກຈາກເຫງົ້າໄມ້ ແມ່ນການສະມາທານຄວາມພຽນແນວນີ້ກໍ ຮຽກວ່າ ຂໍ້ວັດ ບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ເຮົາຈັກນຳມາ ນຳມາດ້ວຍດີ ບັນລຸ ສຳຜັດ ເຮັດໃຫ້ແຈ້ງ ເຊິ່ງອະຣິຍະທຳເຊົ້າວັນນີ້ເອງ ແມ່ນການສະມາທານຄວາມພຽນແນວນີ້ກໍຮຽກວ່າ ຂໍ້ວັດ ບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ເຮົາຈັກນຳມາ ນຳມາດ້ວຍດີ ບັນລຸ ສຳຜັດ ເຮັດໃຫ້ແຈ້ງເຊິ່ງອະຣິຍະທຳ ໃນທ່ຽງນີ້ ຯລຯ ຄ່ຳນີ້ ຯລຯ ກ່ອນພັດ ຯລຯ ຫຼັງພັດ ຯລຯ ປະຖົມຍາມ ຯລຯ ມັດຊິມະຍາມ ຯລຯ ປັດສິມຍາມ ຯລຯ ຂ້າງແຮມ ຯລຯ ຂ້າງຂຶ້ນ ຯລຯ ລະດູຝົນ ຯລຯ ລະດູໜາວ ຯລຯ ລະດູຮ້ອນ ຯລຯ ປະຖົມໄວ ຯລຯ ມັດຊິມະໄວ ຯລຯ ປັດສິມໄວ ແມ່ນການສະມາທານຄວາມພຽນແນວນີ້ກໍຮຽກວ່າ ຂໍ້ວັດ ບໍ່ແມ່ນສິນ

ຄຳວ່າ ສັດເກີດ ໄດ້ແກ່ ສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກຳ ມະນຸດ ລວມຄວາມວ່າ ສັດເກີດໃດ ຯລຯ ສີລະວັດຂອງຕົນ

ຄຳວ່າ ແກ່ບຸກຄົນເຫຼົ່າອື່ນ ໃນຄຳວ່າ ບໍ່ມີໃຜຖາມ ກໍບອກ ຯລຯ ແກ່ບຸກຄົນເຫຼົ່າອື່ນ ໄດ້ແກ່ ບຸກຄົນເຫຼົ່າອື່ນ ຄື ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ມະນຸດ

ຄຳວ່າ ບໍ່ມີໃຜຖາມ ໄດ້ແກ່ ບໍ່ມີໃຜຖາມ ຄື ບໍ່ມີໃຜໄຕ່ຖາມ ບໍ່ມີໃຜຂໍຮ້ອງ ບໍ່ມີໃຜເຊື້ອເຊີນ ບໍ່ມີໃຜເຫຼື້ອມໃສ

ຄຳວ່າ ບອກ ໄດ້ແກ່ ບອກ ສີນ ຂໍ້ວັດ ຫຼື ສີນຂໍ້ວັດຂອງຕົນ ອະທິບາຍວ່າ ຍ່ອມບອກ ຄື ເວົ້າ ກ່າວ ສະແດງ ຊີ້ແຈ່ງ ສີນ ຂໍ້ວັດ ຫຼື ສີນຂໍ້ວັດຂອງຕົນວ່າ ເຮົາເປັນຜູ້ສົມບູນດ້ວຍສີນແດ່ ສົມບູນດ້ວຍຂໍ້ວັດແດ່ ສົມບູນດ້ວຍສີນຂໍ້ວັດແດ່ ສົມບູນດ້ວຍຊາດແດ່ ສົມບູນດ້ວຍໂຄດແດ່ ສົມບູນດ້ວຍຄວາມເປັນບຸດຂອງຜູ້ມີຕະກູນແດ່ ສົມບູນດ້ວຍຄວາມເປັນຜູ້ມີ ຮູບງາມແດ່ ສົມບູນດ້ວຍຊັບແດ່ ສົມບູນດ້ວຍການສຶກສາແດ່ ສົມບູນດ້ວຍໜ້າທີ່ວຽກງານແດ່ ສົມບູນດ້ວຍຫຼັກແຫ່ງສິລະປະວິທະຍາແດ່ ສົມບູນດ້ວຍວິທະຍະຖານະແດ່ ສົມບູນດ້ວຍຄວາມຄົງແກ່ຮຽນແດ່ ສົມບູນດ້ວຍປະຕິພານແດ່ ສົມບູນດ້ວຍສິ່ງອື່ນ ນອກຈາກທີ່ກ່າວແລ້ວແດ່ ອອກບວດຈາກຕະກູນສູງແດ່ ອອກບວດຈາກຕະກູນໃຫຍ່ແດ່ ອອກບວດຈາກຕະກູນມີຊັບ ຫຼາຍແດ່ ອອກບວດຈາກຕະກູນມີໂພຄະຫຼາຍແດ່ ເປັນຜູ້ມີຊື່ສຽງມີຍົດກວ່າຄະລຶຫັດແລະບັນພະຊິດທັງຫຼາຍແດ່ ເປັນຜູ້ໄດ້ຈີວອນບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານແດ່ ເປັນຜູ້ຊົງຈຳພຣະສູດແດ່ ເປັນຜູ້ຊົງຈຳ ພຣະວິໄນແດ່ ເປັນພຣະທຳມະກະຖຶກແດ່ ເປັນຜູ້ຢູ່ປ່າເປັນຂໍ້ວັດແດ່ ເປັນຜູ້ຖືບິນທະບາດ ເປັນຂໍ້ວັດແດ່ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນ ຂໍ້ວັດແດ່ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດແດ່ ເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນ ຂໍ້ວັດແດ່ ເປັນຜູ້ງົດອາຫານຄາບຫຼັງເປັນຂໍ້ວັດແດ່ ເປັນຜູ້ຖືການນັ່ງເປັນຂໍ້ວັດແດ່ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດແດ່ ເປັນຜູ້ໄດ້ປະຖົມຊານແດ່ ເປັນຜູ້ໄດ້ທຸຕິຍະຊານແດ່ ເປັນຜູ້ໄດ້ຕະຕິຍະຊານແດ່ ເປັນຜູ້ໄດ້ຈະຕຸດຖະຊານແດ່ ເປັນຜູ້ໄດ້ອາກາສານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ວິນຍານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດແດ່ ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແດ່ ລວມຄວາມວ່າ ບໍ່ມີໃຜຖາມ ກໍບອກ ໗ລ໗ ແກ່ບຸກຄົນເຫຼົ່າອື່ນ

ຄຳວ່າ ຜູ້ສະຫຼາດທັງຫຼາຍ ໃນຄຳວ່າ ຜູ້ສະຫຼາດທັງຫຼາຍຮຽກສັດເກີດນັ້ນວ່າ ຜູ້ບໍ່ມີອະຣິຍະທຳ ອະທິບາຍວ່າ ຜູ້ສະຫຼາດໃນຂັນ ຜູ້ສະຫຼາດໃນທາດ ຜູ້ສະຫຼາດໃນອາຍະຕະນະ

ຜູ້ສະຫຼາດໃນປະຕິດຈະສະມຸບບາດ ຜູ້ສະຫຼາດໃນສະຕິປັດຖານ ຜູ້ສະຫຼາດໃນສຳມັບປະທານ ຜູ້ສະຫຼາດໃນອິດທິບາດ ຜູ້ສະຫຼາດໃນອິນຊີ ຜູ້ສະຫຼາດໃນພະລະ ຜູ້ສະຫຼາດໃນໂພດຊົງ ຜູ້ສະຫຼາດໃນມັກ ຜູ້ສະຫຼາດໃນຜົນ ຜູ້ສະຫຼາດໃນນິບພານ ຜູ້ສະຫຼາດເຫຼົ່ານັ້ນຮຽກແນວນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງແນວນີ້ວ່າ ນີ້ເປັນທຳຂອງຜູ້ບໍ່ແມ່ນອະຣິຍະ ນີ້ບໍ່ແມ່ນທຳຂອງຜູ້ເປັນອະຣິຍະ ນີ້ເປັນທຳຂອງພວກຄົນພານ ນີ້ບໍ່ແມ່ນທຳຂອງບັນດິດ ນີ້ເປັນທຳຂອງອະສັດຕະບຸຣຸດ ນີ້ບໍ່ແມ່ນທຳຂອງສັດຕະບຸຣຸດ ລວມຄວາມວ່າ ຜູ້ສະຫຼາດທັງຫຼາຍຮຽກສັດເກີດນັ້ນວ່າ ຜູ້ບໍ່ມີອະຣິຍະທຳ

ຄຳວ່າ ສັດເກີດໃດກ່າວເຖິງຕົວເອງເທົ່ານັ້ນ ອະທິບາຍວ່າ ຕົນເອງ ຕັດຮຽກວ່າ ຕົວເອງ

ຄຳວ່າ ກ່າວເຖິງຕົວເອງເທົ່ານັ້ນ ອະທິບາຍວ່າ ຍ່ອມກ່າວເຖິງ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງເຖິງຕົນເອງເທົ່ານັ້ນວ່າ ເຮົາເປັນຜູ້ສົມບູນດ້ວຍສີນແດ່ ສົມບູນດ້ວຍຂໍ້ວັດແດ່ ສົມບູນດ້ວຍ

ສິນຂໍ້ວັດແດ່ ສົມບູນດ້ວຍຊາດແດ່ ສົມບູນດ້ວຍໂຄດແດ່ ສົມບູນດ້ວຍຄວາມເປັນບຸດຂອງຜູ້ມີຕະກູນແດ່ ສົມບູນດ້ວຍຄວາມເປັນຜູ້ມີຮູບງາມແດ່ ສົມບູນດ້ວຍຊັບແດ່ ສົມບູນດ້ວຍການສຶກສາແດ່ ສົມບູນດ້ວຍໜ້າທີ່ວຽກງານແດ່ ສົມບູນດ້ວຍຫຼັກແຫ່ງສິລະປະວິທະ ຍາແດ່ ສົມບູນດ້ວຍວິທະຍະຖານະແດ່ ສົມບູນດ້ວຍຄວາມຄົງແກ່ຮຽນແດ່ ສົມບູນດ້ວຍປະຕິພານແດ່ ສົມບູນດ້ວຍສິ່ງອື່ນນອກຈາກທີ່ກ່າວແລ້ວແດ່ ອອກບວດຈາກຕະກູນສູງແດ່ ອອກ ບວດຈາກຕະກູນໃຫຍ່ແດ່ ອອກບວດຈາກຕະກູນມີຊັບຫຼາຍແດ່ ອອກບວດຈາກຕະກູນມີໂພຄະຫຼາຍແດ່ ເປັນຜູ້ມີຊື່ສຽງມີຍົດກວ່າຄະລຶຫັດ ແລະບັນພະຊິດທັງຫຼາຍແດ່ ເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານແດ່ ເປັນຜູ້ຊົງຈຳພຣະສູດແດ່ ເປັນຜູ້ຊົງຈຳພຣະວິໄນແດ່ ເປັນພຣະທຳມະກະຖຶກແດ່ ເປັນຜູ້ຢູ່ປ່າເປັນຂໍ້ວັດແດ່ ເປັນຜູ້ຖືບິນທະບາດເປັນຂໍ້ວັດແດ່ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດແດ່ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດແດ່ ເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດແດ່ ເປັນຜູ້ງົດອາຫານຄາບຫຼັງເປັນຂໍ້ວັດແດ່ ເປັນຜູ້ຖືການນັ່ງເປັນຂໍ້ວັດແດ່ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດແດ່ ເປັນຜູ້ໄດ້ປະຖົມຊານແດ່ ເປັນຜູ້ໄດ້ທຸຕິຍະຊານແດ່ ເປັນຜູ້ໄດ້ຕະຕິຍະຊານແດ່ ເປັນຜູ້ໄດ້ຈະຕຸດຖະຊານແດ່ ເປັນຜູ້ໄດ້ອາກາສານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ວິນຍານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດແດ່ ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແດ່ ລວມຄວາມວ່າ ສັດເກີດໃດກ່າວເຖິງຕົວເອງເທົ່ານັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສັດເກີດໃດບໍ່ມີໃຜຖາມ
ກໍບອກສິນແລະຂໍ້ວັດຂອງຕົນແກ່ບຸກຄົນເຫຼົ່າອື່ນ
ສັດເກີດໃດກ່າວເຖິງຕົວເອງເທົ່ານັ້ນ
ຜູ້ສະຫຼາດທັງຫຼາຍຮຽກຜູ້ນັ້ນວ່າ ຜູ້ບໍ່ມີອະຣິຍະທຳ

[໑໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສ່ວນພິກຂຸຜູ້ສະງົບ ດັບກິເລດແລ້ວ
ບໍ່ໂອ້ອວດໃນສິນທັງຫຼາຍວ່າ ເຮົາເປັນດັ່ງນີ້
ອັນໜຶ່ງ ພິກຂຸໃດບໍ່ມີກິເລດເຄື່ອງຟູໃນບ່ອນໃດ ໆ ໃນໂລກ
ຜູ້ສະຫຼາດທັງຫຼາຍຮຽກພິກຂຸນັ້ນວ່າ ຜູ້ມີອະຣິຍະທຳ

## ວ່າດ້ວຍຜູ້ໄດ້ຊື່ວ່າພິກຂຸ

ຄຳວ່າ ຜູ້ສະງົບ ໃນຄຳວ່າ ສ່ວນພິກຂຸຜູ້ສະງົບ ດັບກິເລດແລ້ວ ອະທິບາຍວ່າ ຊື່ວ່າຜູ້ສະງົບ ຍ້ອນສະງົບຣາຄະ ຊື່ວ່າຜູ້ສະງົບ ຍ້ອນສະງົບໂທສະ ຊື່ວ່າຜູ້ສະງົບ ຍ້ອນສະງົບ ໂມຫະ

ຄື ຊື່ວ່າຜູ້ສະງົບ ສະງົບເຢັນ ດັບ ຣະງັບໄດ້ແລ້ວ ຍ້ອນສະງົບ ຣະງັບ ສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບຣະງັບໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກ ສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ ລວມ ຄວາມວ່າ ຜູ້ສະງົບ

ຄໍາວ່າ ພິກຂຸ ອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນທໍາລາຍທໍາ ໗ ປະການໄດ້ແລ້ວ ຄື

| | | |
|---|---|---|
| ໑. ທໍາລາຍສັກກາຍະທິດຖິ | (ຄວາມເຫັນວ່າເປັນຕົວຂອງຕົນ) | ໄດ້ແລ້ວ |
| ໒. ທໍາລາຍວິຈິກິດສາ | (ຄວາມລັງເລສົງໄສ) | ໄດ້ແລ້ວ |
| ໓. ທໍາລາຍສີລັບພະຕະປະຣາມາດ | (ຄວາມຢຶດໝັ້ນໃນສິນພົດ) | ໄດ້ແລ້ວ |
| ໔. ທໍາລາຍຣາຄະ | (ຄວາມກໍາໜັດ) | ໄດ້ແລ້ວ |
| ໕. ທໍາລາຍໂທສະ | (ຄວາມຄິດປະທຸດສະຮ້າຍ) | ໄດ້ແລ້ວ |
| ໖. ທໍາລາຍໂມຫະ | (ຄວາມລຸ້ມຫຼົງ) | ໄດ້ແລ້ວ |
| ໗. ທໍາລາຍມານະ | (ຄວາມຖືຕົວ) | ໄດ້ແລ້ວ |

ພິກຂຸນັ້ນທໍາລາຍບາບອະກຸສົນທໍາ ເຊິ່ງເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີ ຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນທີ່ຕັ້ງແຫ່ງຊາດ ຊະຣາ ມໍຣະນະ ຕໍ່ໄປໄດ້ແລ້ວ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສະພິຍະ)

ຜູ້ໃດ ຄວນແກ່ຄໍາຊົມເຊີຍວ່າ
ເປັນຜູ້ເຖິງນິບພານດ້ວຍທາງທີ່ຕົນເຮັດແລ້ວ
ຂ້າມພົ້ນຄວາມສົງໄສໄດ້ແລ້ວ ລະຄວາມເສື່ອມແລະຄວາມຈະເລີນແລ້ວ
ຢູ່ຈົບພົມມະຈັນ ສິ້ນພົບໃໝ່ແລ້ວ ຜູ້ນັ້ນຊື່ວ່າ ພິກຂຸ

ຄໍາວ່າ ສ່ວນພິກຂຸຜູ້ສະງົບ ດັບກິເລດແລ້ວ ອະທິບາຍວ່າ
ຊື່ວ່າດັບກິເລດແລ້ວ ຍ້ອນເຮັດໃຫ້ຣາຄະດັບແລ້ວ
ຊື່ວ່າດັບກິເລດແລ້ວ ຍ້ອນເຮັດໃຫ້ໂທສະດັບແລ້ວ
ຊື່ວ່າດັບກິເລດແລ້ວ ຍ້ອນເຮັດໃຫ້ໂມຫະດັບແລ້ວ

ຊື່ວ່າດັບກິເລດແລ້ວ ຍ້ອນເຮັດໃຫ້ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະ ລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກ

ຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ ດັບແລ້ວ ລວມຄວາມວ່າ ສ່ວນພິກຂຸຜູ້ສະງົບ ດັບກິເລດແລ້ວ

ຄຳວ່າ ເຮົາເປັນດັ່ງນີ້ ໃນຄຳວ່າ ບໍ່ໂອ້ອວດໃນສິນທັງຫຼາຍວ່າ ເຮົາເປັນດັ່ງນີ້ ເປັນບົດສົນທິ ເປັນຄຳເຊື່ອມບົດ ເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ເຮົາເປັນດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ບໍ່ໂອ້ອວດໃນສິນທັງຫຼາຍ ອະທິບາຍວ່າ ພິກຂຸບາງອົງໃນທຳວິໄນນີ້ເປັນ ຜູ້ອວດເປັນຜູ້ໂອ້ອວດ ຄື ຍ່ອມອວດ ຍ່ອມໂອ້ອວດວ່າ ເຮົາເປັນຜູ້ສົມບູນດ້ວຍສິນແດ່ ສົມບູນດ້ວຍຂໍ້ວັດແດ່ ສົມບູນດ້ວຍສິນຂໍ້ວັດແດ່ ສົມບູນດ້ວຍຊາດແດ່ ສົມບູນດ້ວຍໂຄດແດ່ ສົມບູນດ້ວຍຄວາມເປັນບຸດຂອງຜູ້ມີຕະກູນແດ່ ສົມບູນດ້ວຍຄວາມເປັນຜູ້ມີຮູບງາມແດ່ ຯລຯ ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແດ່ ພິກຂຸນີ້ຍ່ອມບໍ່ອວດ ບໍ່ໂອ້ອວດ ຄື ເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວກັບຄວາມໂອ້ອວດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ໂອ້ອວດໃນສິນທັງຫຼາຍວ່າ ເຮົາເປັນດັ່ງນີ້

## ວ່າດ້ວຍຜູ້ມີອະຣິຍະທຳ

ຄຳວ່າ ຜູ້ສະຫຼາດທັງຫຼາຍ ໃນຄຳວ່າ ຜູ້ສະຫຼາດທັງຫຼາຍຮຽກພິກຂຸນັ້ນວ່າ ຜູ້ມີອະຣິຍະທຳ ອະທິບາຍວ່າ ຜູ້ສະຫຼາດໃນຂັນ ສະຫຼາດໃນທາດ ສະຫຼາດໃນອາຍະຕະນະ ສະຫຼາດໃນປະຕິດຈະສະມຸບບາດ ສະຫຼາດໃນສະຕິປັດຖານ ສະຫຼາດໃນສຳມັບປະທານ ສະຫຼາດໃນອິດທິບາດ ສະຫຼາດໃນອິນຊີ ສະຫຼາດໃນພະລະ ສະຫຼາດໃນໂພດຊົງ ສະຫຼາດໃນມັກ ສະຫຼາດໃນຜົນສະຫຼາດໃນນິບພານ ຜູ້ສະຫຼາດເຫຼົ່ານັ້ນ ຍ່ອມຮຽກ ຄື ກ່າວ ບອກ ສະແດງ ຊີ້ແຈ່ງ ແນວນີ້ວ່ານີ້ເປັນທຳຂອງອະຣິຍະຊົນ ນີ້ບໍ່ແມ່ນທຳຂອງອະນະຣິຍະຊົນ ນີ້ເປັນທຳຂອງບັນດິດ ນີ້ບໍ່ແມ່ນທຳຂອງຄົນພານ ນີ້ເປັນທຳຂອງສັດຕະບຸຣຸດ ນີ້ບໍ່ແມ່ນທຳຂອງອະສັດຕະບຸຣຸດ ລວມຄວາມວ່າຜູ້ສະຫຼາດທັງຫຼາຍຮຽກພິກຂຸນັ້ນວ່າ ຜູ້ມີອະຣິຍະທຳ

ຄຳວ່າ ພິກຂຸໃດ ໃນຄຳວ່າ ອັນໜຶ່ງພິກຂຸໃດບໍ່ມີກິເລດເຄື່ອງຟູໃນບ່ອນໃດ ໆ ໃນໂລກໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ກິເລດເຄື່ອງຟູ ອະທິບາຍວ່າ ກິເລດເຄື່ອງຟູ ໗ ຢ່າງ ຄື

໑. ກິເລດເຄື່ອງຟູຄື ຣາຄະ
໒. ກິເລດເຄື່ອງຟູຄື ໂທສະ
໓. ກິເລດເຄື່ອງຟູຄື ໂມຫະ
໔. ກິເລດເຄື່ອງຟູຄື ມານະ

໕. ກິເລດເຄື່ອງຟູຄື ທິດຖິ ໖. ກິເລດເຄື່ອງຟູຄື ກິເລດ
໗. ກິເລດເຄື່ອງຟູຄື ກຳ

ພິກຂຸໃດບໍ່ມີກິເລດເຄື່ອງຟູ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ຄື ກິເລດເຄື່ອງຟູ ພິກຂຸນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ

ຄຳວ່າ ໃນບ່ອນໃດ ໆ ໄດ້ແກ່ ໃນບ່ອນໃດ ຄື ບ່ອນໃດ ໆ ບ່ອນແນວໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ອັນໜຶ່ງພິກຂຸໃດບໍ່ມີກິເລດເຄື່ອງຟູໃນບ່ອນໃດ ໆ ໃນໂລກດ້ວຍ

ເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສ່ວນພິກຂຸຜູ້ສະງົບ ດັບກິເລດແລ້ວ
ບໍ່ໂອ້ອວດໃນສີນທັງຫຼາຍວ່າ ເຮົາເປັນດັ່ງນີ້
ອັນໜຶ່ງ ພິກຂຸໃດບໍ່ມີກິເລດເຄື່ອງຟູໃນບ່ອນໃດ ໆ ໃນໂລກ
ຜູ້ສະຫຼາດທັງຫຼາຍຮຽກພິກຂຸນັ້ນວ່າ ຜູ້ມີອະຣິຍະທຳ

[໑໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຈົ້າລັດທິໃດ ມີທຳທີ່ກຳນົດໄວ້ ອັນປັດໄຈປຸງແຕ່ງ ເຊີດຊູໄວ້
(ແຕ່) ບໍ່ຂາວສະອາດ ເຈົ້າລັດທິນັ້ນເຫັນອານິສົງໃດໃນຕົນ
ອາໄສອານິສົງນັ້ນ ແລະສັນຕິທີ່ກຳເຣີບເຊິ່ງອາໄສກັນເກີດຂຶ້ນ

ຄຳວ່າ ເຈົ້າລັດທິໃດ ມີທຳທີ່ກຳນົດໄວ້ ອັນປັດໄຈປຸງແຕ່ງ ອະທິບາຍວ່າ

ຄຳວ່າ ກຳນົດ ໄດ້ແກ່ ການກຳນົດ ໒ ຢ່າງ ຄື (໑) ການກຳນົດດ້ວຍອຳນາດຕັນຫາ (໒) ການກຳນົດດ້ວຍອຳນາດທິດຖິ ฯລฯ ນີ້ຊື່ວ່າການກຳນົດດ້ວຍອຳນາດຕັນຫາ ฯລฯ ນີ້ຊື່ວ່າການກຳນົດດ້ວຍອຳນາດທິດຖິ

ຄຳວ່າ ອັນປັດໄຈປຸງແຕ່ງ ໄດ້ແກ່ ອັນປັດໄຈປຸງແຕ່ງ ຄື ປຸງແຕ່ງຂຶ້ນ ປຸງແຕ່ງສະເພາະຕັ້ງໄວ້ດີແລ້ວ ລວມຄວາມວ່າ ອັນປັດໄຈປຸງແຕ່ງ

ອີກໄນໜຶ່ງ ທຳທັງຫຼາຍ ບໍ່ທ່ຽງ ອັນປັດໄຈປຸງແຕ່ງ ອາໄສກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ອັນປັດໄຈປຸງແຕ່ງ

ຄຳວ່າ ເຈົ້າລັດທິໃດ ໄດ້ແກ່ ເຈົ້າລັດທິຜູ້ເປັນເຈົ້າຂອງທິດຖິ ທິດຖິ ໖໔ ຕັດຮຽກວ່າ ທຳ ລວມຄວາມວ່າ ເຈົ້າລັດທິໃດ ມີທຳທີ່ກຳນົດໄວ້ ອັນປັດໄຈປຸງແຕ່ງ

## ວ່າດ້ວຍການເຊີດຊູ ໔ ຢ່າງ

ຄຳວ່າ ເຊີດຊູໄວ້ ໃນຄຳວ່າ ມີ ໗ລ໗ ເຊີດຊູໄວ້ (ແຕ່) ບໍ່ຂາວສະອາດ ໄດ້ແກ່ ການ ເຊີດຊູ ໔ ຢ່າງ ຄື (໑) ການເຊີດຊູດ້ວຍອຳນາດຕັນຫາ (໔) ການເຊີດຊູດ້ວຍອຳນາດທິດຖິ ໗ລ໗ ນີ້ຊື່ວ່າ ການເຊີດຊູດ້ວຍອຳນາດຕັນຫາ ໗ລ໗ ນີ້ຊື່ວ່າການເຊີດຊູດ້ວຍອຳນາດທິດຖິ

ເຈົ້າລັດທິນັ້ນ ຍັງບໍ່ລະການເຊີດຊູດ້ວຍອຳນາດຕັນຫາ ຍັງບໍ່ສະລັດຖິ້ມການເຊີດຊູດ້ວຍ ອຳນາດທິດຖິ ຍ້ອນເປັນຜູ້ຍັງບໍ່ສະລັດຖິ້ມການເຊີດຊູດ້ວຍອຳນາດຕັນຫາ ຍັງບໍ່ສະລັດຖິ້ມການ ເຊີດຊູດ້ວຍອຳນາດທິດຖິ ເຈົ້າລັດທິນັ້ນຫ່ງວເຊີດຊູຕັນຫາຫຼືທິດຖິໄວ້ ຄື ມີຕັນຫາເປັນທຸງໄຊມີ ຕັນຫາເປັນຍອດທຸງ ມີຕັນຫາເປັນໃຫຍ່ ມີທິດຖິເປັນທຸງໄຊ ມີທິດຖິເປັນຍອດທຸງ ມີທິດຖິເປັນໃຫຍ່ ຄື ຖືກຕັນຫາຫຼືທິດຖິຄອບງຳຫ່ງວໄປ ລວມຄວາມວ່າ ເຊີດຊູໄວ້

ຄຳວ່າ ມີ ໄດ້ແກ່ ມີ ຄື ຜາກົດ ຫາໄດ້

ຄຳວ່າ ບໍ່ຂາວສະອາດ ໄດ້ແກ່ ບໍ່ຂາວສະອາດ ຄື ບໍ່ຂາວ ບໍ່ບໍລິສຸດ ເສົ້າໝອງ ເປິ ເປື້ອນ ລວມຄວາມວ່າ ມີ ໗ລ໗ ເຊີດຊູໄວ້ (ແຕ່) ບໍ່ຂາວສະອາດ

ຄຳວ່າ (ອານິສົງ) ໃດໃນຕົນ ໃນຄຳວ່າ ເຫັນອານິສົງໃດໃນຕົນ ໄດ້ແກ່ ອານິສົງໃດໃນ ຕົນ ທິດຖິ ຕັດຮຽກວ່າ ຕົນ ເຈົ້າລັດທິນັ້ນເຫັນອານິສົງ ໔ ຢ່າງແຫ່ງທິດຖິຂອງຕົນ

ຄື (໑) ອານິສົງທີ່ມີໃນຊາດນີ້ (໔) ອານິສົງທີ່ມີໃນຊາດໜ້າ

ອານິສົງແຫ່ງທິດຖິທີ່ມີໃນຊາດນີ້ ເປັນແນວໃດ?

ຄື ສາດສະດາມີທິດຖິແນວໃດ ສາວົກກໍມີທິດຖິແນວນັ້ນ ຄື ສາວົກ ຍ່ອມສັກກາຣະ ເຄົາລົບ ນັບຖື ບູຊາ ທຳຄວາມຢຳເກງສາດສະດາຜູ້ມີທິດຖິແນວນັ້ນ ແລະໄດ້ຈີວອນ ບິນທະ ບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານເຊິ່ງມີສາດສະດານັ້ນເປັນຕົ້ນເຫດ ນີ້ຊື່ວ່າອານິ ສົງແຫ່ງທິດຖິທີ່ມີໃນຊາດນີ້

ອານິສົງແຫ່ງທິດຖິທີ່ມີໃນຊາດໜ້າ ເປັນແນວໃດ?

ຄື ບຸກຄົນຍ່ອມຫວັງຜົນຕໍ່ໄປວ່າ ທິດຖິນີ້ ຄວນເພື່ອຄວາມເປັນນາກ ເປັນຄຸດ ເປັນຍັກ ເປັນອະສູນ ເປັນຄົນທັບ ເປັນທ້າວມະຫາຣາດ ເປັນພຣະອິນ ເປັນພຣະພົມ ຫຼື ເປັນເທວະດາ ທິດຖິນີ້ ຄວນເພື່ອຄວາມມົດຈິດ ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ສັດທັງຫຼາຍຍ່ອມມົດຈິດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼຸດພົ້ນໄປດ້ວຍ

ທິດຖິນີ້ ເຮົາຈັກມີດຈິດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼຸດພົ້ນໄປດ້ວຍທິດຖິນີ້ ນີ້ຊື່ວ່າອານິສົງແຫ່ງທິດຖິທີ່ມີໃນຊາດໜ້າ ເຈົ້າລັດທິນັ້ນເຫັນ ຄື ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງອານິສົງ ໘ ຢ່າງນີ້ແຫ່ງທິດຖິ ຂອງຕົນ ລວມຄວາມວ່າ ເຫັນອານິສົງໃດໃນຕົນ

## ວ່າດ້ວຍສັນຕິ ໓ ຢ່າງ

ຄຳວ່າ ອາໄສອານິສົງນັ້ນ ແລະສັນຕິທີ່ກຳເຣີບເຊິ່ງອາໄສກັນເກີດຂຶ້ນ ອະທິບາຍວ່າ ສັນຕິ ໓ ຢ່າງ ຄື (໑) ອັດຈັນຕະສັນຕິ (ຄວາມສະງົບໂດຍສ່ວນດຽວ) (໒) ຕະທັງຄະສັນຕິ (ຄວາມສະງົບດ້ວຍອົງນັ້ນ ໆ) (໓) ສົມມຸດສັນຕິ (ຄວາມສະງົບໂດຍສົມມຸດ)

ອັດຈັນຕະສັນຕິ ເປັນແນວໃດ?

ຄື ອະມະຕະນິບພານ ຮຽກວ່າ ອັດຈັນຕະສັນຕິ ຄື ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ນີ້ຊື່ວ່າອັດຈັນຕະສັນຕິ

ຕະທັງຄະສັນຕິ ເປັນແນວໃດ?

ຄື ຜູ້ບັນລຸປະຖົມຊານກໍມີນິວອນສະງົບໄປ ຜູ້ບັນລຸທຸຕິຍະຊານກໍມີວິຕົກວິຈານສະງົບໄປ ຜູ້ບັນລຸຕະຕິຍະຊານກໍມີປີຕິສະງົບໄປ ຜູ້ບັນລຸຈະຕຸດຖະຊານກໍມີສຸກ ແລະທຸກສະງົບໄປ ຜູ້ບັນລຸອາກາສານັນຈາຍະຕະນະສະມາບັດກໍມີຣູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ໌ສະງົບໄປ ຜູ້ບັນລຸວິນຍານັນຈາຍະຕະນະສະມາບັດ ກໍມີອາກາສານັນຈາຍະຕະນະສັນຍາສະງົບໄປ ຜູ້ບັນລຸອາກິນຈັນຍາຍະຕະນະສະມາບັດ ກໍມີວິນຍານັນຈາຍະຕະນະສັນຍາສະງົບໄປ ຜູ້ບັນລຸເນວະສັນຍານາສັນຍາຍະຕະນະສະມາບັດ ກໍມີອາກິນຈັນຍາຍະຕະນະສັນຍາສະງົບໄປ ນີ້ຊື່ວ່າ ຕະທັງຄະສັນຕິ

ສົມມຸດສັນຕິ ເປັນແນວໃດ?

ຄື ຄວາມສະງົບແຫ່ງທິດຖິ ໖໒ ຮຽກວ່າ ສົມມຸດສັນຕິ ອັນໜຶ່ງ ສົມມຸດສັນຕິພຣະຜູ້ມີ-ພຣະພາກເຈົ້າຊົງປະສົງວ່າ ສັນຕິ ໃນຄາຖານີ້

ຄຳວ່າ ອາໄສອານິສົງນັ້ນ ແລະສັນຕິທີ່ກຳເຣີບເຊິ່ງອາໄສກັນເກີດຂຶ້ນ ອະທິບາຍວ່າ ອາໄສ ຄື ອິງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອສັນຕິທີ່ກຳເຣີບ ຄື ສັນຕິທີ່ກຳເຣີບທົ່ວສະເທືອນ ສັ່ນໄຫວ ຫວັ່ນໄຫວ ກະທົບຈົນວ່າ ກຳນົດແລ້ວ ກຳນົດທົ່ວແລ້ວ ບໍ່ທ່ຽງ ອັນປັດໄຈປຸງແຕ່ງ ອາໄສກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ອາໄສອານິສົງນັ້ນ ແລະສັນຕິທີ່ກຳເຣີບເຊິ່ງອາໄສກັນເກີດຂຶ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຈົ້າລັດທິໃດ ມີທໍາທີ່ກໍານົດໄວ້ ອັນປັດໄຈປຸງແຕ່ງ ເຊີດຊູໄວ້
(ແຕ່) ບໍ່ຂາວສະອາດ ເຈົ້າລັດທິນັ້ນເຫັນອານິສົງໃດໃນຕົນ
ອາໄສອານິສົງນັ້ນ ແລະສັນຕິທີ່ກໍາເຣີບເຊິ່ງອາໄສກັນເກີດຂຶ້ນ

[໔໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄວາມຖືໝັ້ນດ້ວຍອໍານາດທິດຖິ ບໍ່ແມ່ນກ້າວລ່ວງໄດ້ງ່າຍ ໆ
ການປົງໃຈໃນທໍາທັງຫຼາຍແລ້ວຖືໝັ້ນ
ກໍບໍ່ແມ່ນກ້າວລ່ວງໄດ້ງ່າຍ ຍ້ອນເຫດນັ້ນ ໃນຄວາມຖືໝັ້ນເຫຼົ່ານັ້ນ
ນໍຣະຊົນຍ່ອມສະລັດຖິ້ມທໍາແດ່ ຢຶດຖືທໍາໄວ້ແດ່

## ວ່າດ້ວຍຄວາມຖືໝັ້ນ

ຄໍາວ່າ ຄວາມຖືໝັ້ນດ້ວຍອໍານາດທິດຖິ ໃນຄໍາວ່າ ຄວາມຖືໝັ້ນດ້ວຍອໍານາດທິດຖິ ບໍ່ແມ່ນກ້າວລ່ວງໄດ້ງ່າຍ ໆ ອະທິບາຍວ່າ ຄວາມຢຶດໝັ້ນຖືໝັ້ນວ່າ ໂລກທ່ຽງນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຊື່ວ່າຄວາມຖືໝັ້ນດ້ວຍອໍານາດທິດຖິ ຄວາມຢຶດໝັ້ນຖືໝັ້ນວ່າ ໂລກບໍ່ທ່ຽງ ຯລຯ ໂລກມີທີ່ສຸດ ຯລຯ ໂລກບໍ່ມີທີ່ສຸດ ຯລຯ ຊີວະກັບສະຣີຣະເປັນຢ່າງດຽວກັນ ຯລຯ ຊີວະ ກັບສະຣີຣະ ເປັນຄົນລະຢ່າງກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຊື່ວ່າຄວາມຖືໝັ້ນດ້ວຍອໍານາດທິດຖິ

ຄໍາວ່າ ຄວາມຖືໝັ້ນດ້ວຍອໍານາດທິດຖິ ບໍ່ແມ່ນກ້າວລ່ວງໄດ້ງ່າຍ ໆ ອະທິບາຍວ່າ ຄວາມຖືໝັ້ນດ້ວຍອໍານາດທິດຖິ ບໍ່ແມ່ນກ້າວລ່ວງໄດ້ໂດຍງ່າຍ ຄື ກ້າວລ່ວງໄດ້ໂດຍຍາກ ຂ້າມໄດ້ຍາກ ຂ້າມພົ້ນໄດ້ຍາກ ກ້າວລ່ວງພົ້ນໄດ້ຍາກ ກັບຕົວຫຼີກໄດ້ຍາກ ລວມຄວາມວ່າ ຄວາມຖືໝັ້ນດ້ວຍອໍານາດທິດຖິ ບໍ່ແມ່ນກ້າວລ່ວງໄດ້ງ່າຍ ໆ

ຄໍາວ່າ ໃນທໍາທັງຫຼາຍ ໃນຄໍາວ່າ ການປົງໃຈໃນທໍາທັງຫຼາຍແລ້ວຖືໝັ້ນ ໄດ້ແກ່ໃນທິດຖິ ໖໔

ຄໍາວ່າ ປົງໃຈແລ້ວ ໄດ້ແກ່ ຕົກລົງໃຈແລ້ວ ພິຈາລະນາແລ້ວ ຕັດສິນແລ້ວ ຊີ້ຂາດແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ

ຄໍາວ່າ ຖືໝັ້ນ ໄດ້ແກ່ ຈັບໝັ້ນ ຢຶດໝັ້ນ ຖືໝັ້ນ ລວບຖື ລວມຖື ລວບລວມຖື ໃນຄວາມຢຶດໝັ້ນທັງຫຼາຍ ຄືຄວາມຖື ຄວາມຢຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອວ່າ ຂໍ້ນີ້ຈິງ ແທ້ ແນ່ ແທ້ຈິງ ຕາມເປັນຈິງ ບໍ່ວິປະຣິດ ລວມຄວາມວ່າ ການປົງໃຈໃນທໍາທັງຫຼາຍແລ້ວຖືໝັ້ນ

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ໃນຄວາມຖືໝັ້ນເຫຼົ່ານັ້ນ ນໍຣະຊົນໄດ້ແກ່ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ

ຄຳວ່າ ນໍຣະຊົນ ໄດ້ແກ່ ສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດສັດເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ໃນຄວາມຖືໝັ້ນເຫຼົ່ານັ້ນ ໄດ້ແກ່ ໃນຄວາມຖືໝັ້ນດ້ວຍອຳນາດທິດຖິເຫຼົ່ານັ້ນ ລວມຄວາມວ່າ ຍ້ອນເຫດນັ້ນ ໃນຄວາມຖືໝັ້ນເຫຼົ່ານັ້ນ ນໍຣະຊົນ

## ວ່າດ້ວຍການສະລັດຖິ້ມ ໘ ຢ່າງ

ຄຳວ່າ ຍ່ອມສະລັດຖິ້ມ ໃນຄຳວ່າ ຍ່ອມສະລັດຖິ້ມທຳແດ່ ຍຶດຖືທຳໄວ້ແດ່

ໄດ້ແກ່ ຍ່ອມສະລັດຖິ້ມ ຍ້ອນເຫດ ໘ ຢ່າງ ຄື (໑) ສະລັດຖິ້ມດ້ວຍການຕັດສິນຂອງຜູ້ອື່ນ (໘) ເມື່ອບໍ່ສຳເລັດປະໂຫຍດເອງກໍສະລັດຖິ້ມສາ

ນໍຣະຊົນສະລັດຖິ້ມດ້ວຍການຕັດສິນຂອງຜູ້ອື່ນ ເປັນແນວໃດ?

ຄື ຜູ້ອື່ນຕັດສິນວ່າ ສາດສະດານັ້ນ ບໍ່ແມ່ນສັບພັນຍູ ທຳບໍ່ແມ່ນທຳທີ່ສາດສະດາກ່າວສອນໄວ້ດີແລ້ວ ໝູ່ຄະນະບໍ່ແມ່ນຜູ້ປະຕິບັດດີແລ້ວ ທິດຖິບໍ່ແມ່ນສິ່ງທີ່ຈະເລີນ ປະຕິປະທາບໍ່ແມ່ນສາດສະດາ ບັນຍັດໄວ້ດີແລ້ວ ມັກບໍ່ແມ່ນທາງນຳອອກໄປຈາກທຸກ ຄວາມບໍລິສຸດ ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ໃນທິດຖິນີ້ບໍ່ມີ ໃນທິດຖິນີ້ສັດທັງຫຼາຍຍ່ອມບໍລິສຸດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼືຫຼຸດພົ້ນໄປ ບໍ່ມີ ທິດຖິນີ້ ຊົ່ວ ຊາມ ຕໍ່າຊາມ ໜ້າຣັງກຽດ ຫຍາບຊ້າ ເລັກໜ້ອຍ ຜູ້ອື່ນຍ່ອມຕັດສິນແນວນີ້ ນໍຣະຊົນທີ່ຖືກຕັດສິນແນວນີ້ ກໍສະລັດຖິ້ມສາດສະດາ ສະລັດຖິ້ມທຳທີ່ສາດສະດາກ່າວສອນ ສະລັດຖິ້ມໝູ່ຄະນະ ສະລັດຖິ້ມທິດຖິ ສະລັດຖິ້ມປະຕິປະທາ ສະລັດຖິ້ມມັກ ນໍຣະຊົນຊື່ວ່າສະລັດຖິ້ມດ້ວຍການຕັດສິນຂອງຜູ້ອື່ນເປັນແນວນີ້

ນໍຣະຊົນເມື່ອບໍ່ສຳເລັດປະໂຫຍດເອງກໍສະລັດຖິ້ມ ເປັນແນວໃດ?

ຄື ນໍຣະຊົນເມື່ອບໍ່ເຮັດສິນໃຫ້ສຳເລັດປະໂຫຍດກໍສະລັດຖິ້ມສິນ ເມື່ອບໍ່ເຮັດຂໍ້ວັດໃຫ້ສຳເລັດປະໂຫຍດກໍສະລັດຖິ້ມຂໍ້ວັດ ເມື່ອບໍ່ເຮັດສິນຂໍ້ວັດໃຫ້ສຳເລັດປະໂຫຍດກໍສະລັດຖິ້ມສິນຂໍ້ວັດ ນໍຣະຊົນ ຊື່ວ່າ ເມື່ອບໍ່ສຳເລັດປະໂຫຍດເອງກໍສະລັດຖິ້ມ ເປັນແນວນີ້

ຄຳວ່າ ຍຶດຖືທຳໄວ້ແດ່ ອະທິບາຍວ່າ ນໍຣະຊົນຖື ຍຶດໝັ້ນ ຖືໝັ້ນສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ແລະມັກໄວ້ແດ່

ລວມຄວາມວ່າ ນໍຣະຊົນຍ່ອມສະລັດຖິ້ມທຳແດ່ ຍຶດຖືທຳໄວ້ແດ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄວາມຖືໝັ້ນດ້ວຍອຳນາດທິດຖິ ບໍ່ແມ່ນກ້າວລ່ວງໄດ້ງ່າຍໆ
ການປົງໃຈໃນທຳທັງຫຼາຍແລ້ວຖືໝັ້ນ
ກໍບໍ່ແມ່ນກ້າວລ່ວງໄດ້ງ່າຍ ຍ້ອນເຫດນັ້ນ ໃນຄວາມຖືໝັ້ນເຫຼົ່ານັ້ນ
ນໍຣະຊົນຍ່ອມສະລັດຖິ້ມທຳແດ່ ຍຶດຖືທຳໄວ້ແດ່

[໔໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ທິດຖິທີ່ກຳນົດ (ເພື່ອເກີດ) ໃນພົບນ້ອຍພົບໃຫຍ່
ຂອງຜູ້ມີປັນຍາເຄື່ອງກຳຈັດ ບໍ່ມີໃນບ່ອນໃດ ໆ ໃນໂລກ
ຍ້ອນຜູ້ມີປັນຍາເຄື່ອງກຳຈັດນັ້ນ ລະຄວາມຫຼອກລວງ
ແລະຄວາມຖືຕົວໄດ້ແລ້ວ ບໍ່ມີຄວາມຖືໝັ້ນ
ຈະເພິ່ງໄປດ້ວຍເຫດອັນໃດນໍ?

## ວ່າດ້ວຍປັນຍາເຄື່ອງກຳຈັດ

ຄຳວ່າ ຜູ້ມີປັນຍາເຄື່ອງກຳຈັດ ໃນຄຳວ່າ ທິດຖິທີ່ກຳນົດ (ເພື່ອເກີດ) ໃນພົບນ້ອຍພົບໃຫຍ່ ຂອງຜູ້ມີປັນຍາເຄື່ອງກຳຈັດ ບໍ່ມີໃນບ່ອນໃດ ໆ ໃນໂລກ ອະທິບາຍວ່າ ປັນຍາ ຕັດຮຽກວ່າ ເຄື່ອງກຳຈັດ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມໄຈ້ແຍກ ຄວາມສອດສ່ອງທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ່ມແຈ້ງ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເປັນຄືແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ປັນຍາເຄື່ອງເຫັນແຈ້ງ ຄວາມຮູ້ດີ ປັນຍາເປັນຄືປະຕັກ ປັນຍາປັນຍິນຊີ ປັນຍາພະລະ ປັນຍາເປັນຄືອາວຸດ ປັນຍາເປັນຄືຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເປັນຄືດວງປະທີບ ປັນຍາເປັນຄືດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ

ຍ້ອນເຫດໃດ ປັນຍາຈຶ່ງຕັດຮຽກວ່າ ເຄື່ອງກຳຈັດ ຍ້ອນປັນຍານັ້ນເປັນເຄື່ອງກຳຈັດຊຳຣະລ້າງ ແລະຊັກຟອກກາຍທຸດຈະຣິດ ฯลฯ ວະຈີທຸດຈະຣິດ ฯลฯ ມະໂນທຸດຈະຣິດ ฯลฯ ຍ້ອນປັນຍານັ້ນເປັນເຄື່ອງກຳຈັດ ຊຳຣະ ລ້າງແລະຊັກຟອກຣາຄະ ฯลฯ ໂທສະ ฯลฯ ໂມຫະ ฯลฯ ໂກທະ ฯลฯ ອຸປະນາຫະ ฯลฯ ມັກຂະ ฯลฯ ປະລາສະ ฯลฯ ອິດສາ ฯลฯ ມັດສະຣິຍະ ฯลฯ ມາຍາ ฯลฯ ສາເຖີຍຍະ ฯลฯ ຖຳພະ ฯลฯ ສາຣຳພະ ฯลฯ ມານະ ฯลฯ ອະຕິມານະ ฯลฯ ມະທະ ฯลฯ ປະມາທະ ฯลฯ ກິເລດທຸກຊະນິດ ฯลฯ ທຸດຈະຣິດທຸກທາງ ฯลฯ ຄວາມກະວົນກະວາຍທຸກຢ່າງ ฯลฯ ຄວາມຮ້ອນຮົນທຸກສະຖານ ฯลฯ ຄວາມເດືອດຮ້ອນທຸກປະການ ฯลฯ ອະກຸສະລາພິສັງຂານທຸກປະເພດ ຍ້ອນເຫດນັ້ນ ປັນຍາຈຶ່ງຕັດຮຽກວ່າ ເຄື່ອງກຳຈັດ

ອີກໄນໜຶ່ງ ສຳມາທິດຖິເປັນເຄື່ອງກຳຈັດ ຊຳຮະ ລ້າງ ແລະຊັກຟອກມິດສາທິດຖິໄດ້ ສຳມາສັງກັບປະເປັນເຄື່ອງກຳຈັດ ຊຳຮະ ລ້າງ ແລະຊັກຟອກມິດສາສັງກັບປະໄດ້ ສຳມາວາຈາເປັນເຄື່ອງກຳຈັດ ຯລຯ ມິດສາວາຈາໄດ້ ສຳມາກຳມັນຕະເປັນເຄື່ອງກຳຈັດ ຯລຯ ມິດສາກຳມັນຕະໄດ້ ສຳມາອາຊີວະ ເປັນເຄື່ອງກຳຈັດ ຯລຯ ມິດສາອາຊີວະໄດ້ ສຳມາວາຍາມະ ເປັນເຄື່ອງກຳຈັດ ຯລຯ ມິດສາວາຍາມະໄດ້ ສຳມາສະຕິເປັນເຄື່ອງກຳຈັດ ຯລຯ ມິດສາສະຕິໄດ້ ສຳມາສະມາທິ ເປັນເຄື່ອງກຳຈັດ ຯລຯ ມິດສາສະມາທິໄດ້ ສຳມາຍານະເປັນເຄື່ອງກຳຈັດ ຯລຯ ມິດສາຍານະໄດ້ ສຳມາວິມຸດຕິ ເປັນເຄື່ອງກຳຈັດ ຊຳຮະ ລ້າງ ແລະຊັກຟອກມິດສາວິມຸດຕິໄດ້

ອີກໄນໜຶ່ງ ອະຣິຍະມັກມີອົງ ໘ ເປັນເຄື່ອງກຳຈັດ ຊຳຮະ ລ້າງ ແລະຊັກຟອກກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ອະຣິຍະມັກມີອົງ ໘ ເປັນເຄື່ອງກຳຈັດ ຊຳຮະລ້າງ ແລະຊັກຟອກອະກຸສະລາພິສັງຂານທຸກປະເພດ

ພຣະອະຣະຫັນ ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍທຳເປັນເຄື່ອງຊຳຮະລ້າງເຫຼົ່ານີ້ ຍ້ອນເຫດນັ້ນ ພຣະອະຣະຫັນ ຈຶ່ງຊື່ວ່າ ຜູ້ມີປັນຍາເຄື່ອງກຳຈັດ ພຣະອະຣະຫັນນັ້ນ ເປັນຜູ້ກຳຈັດຄວາມກຳໜັດໄດ້ແລ້ວ ກຳຈັດບາບໄດ້ແລ້ວ ກຳຈັດກິເລດໄດ້ແລ້ວ ກຳຈັດຄວາມຮ້ອນຮົນໄດ້ແລ້ວ ລວມຄວາມວ່າ ຜູ້ມີປັນຍາເຄື່ອງກຳຈັດ

ຄຳວ່າ ໃນບ່ອນໃດ ໆ ໄດ້ແກ່ ໃນບ່ອນໃດ ຄື ບ່ອນໃດ ໆ ພາຍໃນ ພາຍນອກ ຫຼືທັງພາຍໃນແລະພາຍນອກ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ

ຄຳວ່າ ທີ່ກຳນົດ ໄດ້ແກ່ ການກຳນົດ ໒ ຢ່າງ ຄື (໑) ການກຳນົດດ້ວຍ ອຳນາດຕັນຫາ (໒) ການກຳນົດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າການກຳນົດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການກຳນົດດ້ວຍອຳນາດທິດຖິ

ຄຳວ່າ ໃນພົບນ້ອຍພົບໃຫຍ່ ອະທິບາຍວ່າ ໃນພົບນ້ອຍພົບໃຫຍ່ ຄືໃນກຳມາະວັດແລະວິປາກະວັດ ໃນກຳມະວັດເປັນເຄື່ອງເກີດໃນກາມະພົບ ໃນວິປາກະວັດເປັນເຄື່ອງເກີດໃນກາມະພົບ ໃນກຳມະວັດເປັນເຄື່ອງເກີດໃນຣູບພົບ ໃນວິປາກະວັດເປັນເຄື່ອງເກີດໃນຣູບພົບ ໃນກຳມະວັດ ເປັນເຄື່ອງເກີດໃນອະຣູບພົບ ໃນວິປາກະວັດເປັນເຄື່ອງເກີດໃນອະຣູບພົບ ໃນພົບຕໍ່ໄປ ໃນຄະຕິຕໍ່ໄປ ໃນການຖືກຳເນີດຕໍ່ໄປ ໃນປະຕິສົນທິຕໍ່ໄປ ໃນການບັງເກີດຂອງອັດຕະພາບ ຕໍ່ໄປ

ຄຳວ່າ ທິດຖິທີ່ກຳນົດ (ເພື່ອເກີດ) ໃນພົບນ້ອຍພົບໃຫຍ່ ຂອງຜູ້ມີປັນຍາເຄື່ອງກຳຈັດ ບໍ່ມີໃນບ່ອນໃດ ໆ ໃນໂລກ ອະທິບາຍວ່າ ທິດຖິທີ່ກຳນົດ ຄື ກຳນົດທົ່ວ ປຸງແຕ່ງສະເພາະ ຕັ້ງ

ໝັ້ນໄວ້ດີແລ້ວ (ເພື່ອເກີດ) ໃນພົບນ້ອຍພົບໃຫຍ່ຂອງຜູ້ມີປັນຍາເຄື່ອງກຳຈັດ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ໃນບ່ອນໃດ ໆ ໃນໂລກ ໄດ້ແກ່ ທິດຖິທີ່ກຳນົດນັ້ນຜູ້ມີປັນຍາເຄື່ອງກຳຈັດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ທິດຖິທີ່ກຳນົດ (ເພື່ອເກີດ) ໃນພົບນ້ອຍພົບໃຫຍ່ ຂອງຜູ້ມີປັນຍາເຄື່ອງກຳຈັດ ບໍ່ມີໃນບ່ອນໃດ ໆ ໃນໂລກ

## ວ່າດ້ວຍຄວາມຫຼອກລວງແລະຄວາມຖືຕົວ

ຄຳວ່າ ຜູ້ມີປັນຍາເຄື່ອງກຳຈັດ ລະຄວາມຫຼອກລວງ ແລະຄວາມຖືຕົວໄດ້ແລ້ວ ອະທິບາຍວ່າ ຄວາມປະພຶດຫຼອກລວງ ຕັດຮຽກວ່າ ຄວາມຫຼອກລວງ ຄົນບາງຄົນໃນ ໂລກນີ້ປະພຶດທຸດຈະຣິດດ້ວຍກາຍ ວາຈາ ໃຈ ແລ້ວຕັ້ງຄວາມປາຖະໜາຊົ່ວຊາມ ຍ້ອນການປົກປິດທຸດຈະຣິດນັ້ນເປັນເຫດ ຄື ປາຖະໜາວ່າ ໃຜຢ່າຮູ້ທັນເຮົາເລີຍ ດຳຣິວ່າ ໃຜຢ່າຮູ້ທັນເຮົາເລີຍ ກ່າວວາຈາດ້ວຍຄິດວ່າ ໃຜຢ່າຮູ້ທັນເຮົາເລີຍ ພະຍາຍາມທາງກາຍດ້ວຍຄິດວ່າ ໃຜຢ່າຮູ້ທັນເຮົາເລີຍ

ຄວາມຫຼອກລວງ ຄວາມເປັນຜູ້ມີຄວາມຫຼອກລວງ ຄວາມທຳທ່າ ຄວາມລໍ້ລວງ ການປິດບັງ ການຫຼີບລ່ຽງ ການຫຼີກລ່ຽງ ການຊ່ອນ ການເຊື່ອງ ການປິດ ການປົກປິດ ການບໍ່ເປີດເຜີຍ ການບໍ່ເຮັດໃຫ້ແຈ່ມແຈ້ງ ການປິດສະນິດ ການທຳຄວາມຊົ່ວເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຫຼອກລວງ

ຄຳວ່າ ຄວາມຖືຕົວ ອະທິບາຍວ່າ ຄວາມຖືຕົວໄນດຽວ ຄື ຄວາມທີ່ຈິດໃຝ່ສູງ

ຄວາມຖືຕົວ ໒ ໄນ ຄື

໑. ການຍົກຕົນ
໒. ການຂົ່ມຜູ້ອື່ນ

ຄວາມຖືຕົວ ໓ ໄນ ຄື

໑. ຄວາມຖືຕົວວ່າເຮົາເລີດກວ່າເຂົາ
໒. ຄວາມຖືຕົວວ່າເຮົາສະເໝີເຂົາ
໓. ຄວາມຖືຕົວວ່າເຮົາດ້ອຍກວ່າເຂົາ

ຄວາມຖືຕົວ ໔ ໄນ ຄື

໑. ເກີດຄວາມຖືຕົວຍ້ອນ ລາບ
໒. ເກີດຄວາມຖືຕົວຍ້ອນ ຍົດ
໓. ເກີດຄວາມຖືຕົວຍ້ອນ ຄວາມສັນເສີນ
໔. ເກີດຄວາມຖືຕົວຍ້ອນ ຄວາມສຸກ

ຄວາມຖືຕົວ ໕ ໄນ ຄື

໑. ເກີດຄວາມຖືຕົວວ່າເຮົາໄດ້ ຮູບທີ່ຖືກໃຈ
໒. ເກີດຄວາມຖືຕົວວ່າເຮົາໄດ້ ສຽງທີ່ຖືກໃຈ
໓. ເກີດຄວາມຖືຕົວວ່າເຮົາໄດ້ ກິ່ນທີ່ຖືກໃຈ
໔. ເກີດຄວາມຖືຕົວວ່າເຮົາໄດ້ ຣົດທີ່ຖືກໃຈ
໕. ເກີດຄວາມຖືຕົວວ່າເຮົາໄດ້ ໂຜດຖັບພະທີ່ຖືກໃຈ

ຄວາມຖືຕົວ ໖ ໄນ ຄື

໑. ເກີດຄວາມຖືຕົວຍ້ອນມີ ຕາສົມບູນ
໒. ເກີດຄວາມຖືຕົວຍ້ອນມີ ຫູສົມບູນ
໓. ເກີດຄວາມຖືຕົວຍ້ອນມີ ດັງສົມບູນ
໔. ເກີດຄວາມຖືຕົວຍ້ອນມີ ລີ້ນສົມບູນ
໕. ເກີດຄວາມຖືຕົວຍ້ອນມີ ກາຍສົມບູນ
໖. ເກີດຄວາມຖືຕົວຍ້ອນມີ ໃຈສົມບູນ

ຄວາມຖືຕົວ ໗ ໄນ ຄື

໑. ຄວາມຖືຕົວ
໒. ຄວາມດູໝິ່ນ
໓. ຄວາມດູໝິ່ນດ້ວຍອຳນາດຄວາມຖືຕົວ
໔. ຄວາມຖືຕົວວ່າດ້ອຍກວ່າເຂົາ
໕. ຄວາມຖືຕົວວ່າເລີດກວ່າເຂົາ
໖. ຄວາມຖືເຮົາຖືເຂົາ
໗. ຄວາມຖືຕົວຜິດ ໆ

ຄວາມຖືຕົວ ໘ ໄນ ຄື

໑. ເກີດຄວາມຖືຕົວຍ້ອນໄດ້ ລາບ
໒. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນເສື່ອມລາບ
໓. ເກີດຄວາມຖືຕົວຍ້ອນມີຍົດ
໔. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນເສື່ອມຍົດ
໕. ເກີດຄວາມຖືຕົວຍ້ອນຄວາມສັນເສີນ
໖. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນຖືກນິນທາ

໗. ເກີດຄວາມຖືຕົວຍ້ອນຄວາມສຸກ
໘. ເກີດຄວາມຖືຕົວວ່າຕົກຕໍ່າຍ້ອນຄວາມທຸກ

ຄວາມຖືຕົວ ໙ ໄນ ຄື

໑. ເປັນຜູ້ເລີດກວ່າເຂົາຖືຕົວວ່າເລີດກວ່າເຂົາ
໒. ເປັນຜູ້ເລີດກວ່າເຂົາຖືຕົວວ່າສະເໝີເຂົາ
໓. ເປັນຜູ້ເລີດກວ່າເຂົາຖືຕົວວ່າດ້ອຍກວ່າເຂົາ
໔. ເປັນຜູ້ສະເໝີເຂົາຖືຕົວວ່າເລີດກວ່າເຂົາ
໕. ເປັນຜູ້ສະເໝີເຂົາຖືຕົວວ່າສະເໝີເຂົາ
໖. ເປັນຜູ້ສະເໝີເຂົາຖືຕົວວ່າດ້ອຍກວ່າເຂົາ
໗. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າເລີດກວ່າເຂົາ
໘. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າສະເໝີເຂົາ
໙. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າດ້ອຍກວ່າເຂົາ

ຄວາມຖືຕົວ ໑໐ ໄນ ຄື ຄົນບາງຄົນໃນໂລກນີ້
໑. ເກີດຄວາມຖືຕົວຍ້ອນຊາດ
໒. ເກີດຄວາມຖືຕົວຍ້ອນໂຄດ
໓. ເກີດຄວາມຖືຕົວຍ້ອນເປັນບຸດຂອງຜູ້ມີຕະກູນ
໔. ເກີດຄວາມຖືຕົວຍ້ອນເປັນຜູ້ມີຮູບງາມ
໕. ເກີດຄວາມຖືຕົວຍ້ອນມີຊັບ
໖. ເກີດຄວາມຖືຕົວຍ້ອນການສຶກສາ
໗. ເກີດຄວາມຖືຕົວຍ້ອນໜ້າທີ່ວຽກງານ
໘. ເກີດຄວາມຖືຕົວຍ້ອນມີຫຼັກແຫ່ງສິລະປະວິທະຍາ
໙. ເກີດຄວາມຖືຕົວຍ້ອນວິທະຍະຖານະ
໑໐. ເກີດຄວາມຖືຕົວຍ້ອນຄວາມຄົງແກ່ຮຽນ ເກີດຄວາມຖືຕົວຍ້ອນປະຕິພານ ຫຼືເກີດຄວາມຖືຕົວ ຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວ

ຄວາມຖືຕົວ ກະຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເປັນຄືທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເປັນຄືທຸງ ເຫັນ ປານນີ້ ນີ້ຕັດຮຽກວ່າ ຄວາມຖືຕົວ

ຄຳວ່າ ຜູ້ມີປັນຍາເຄື່ອງກຳຈັດ ລະຄວາມຫຼອກລວງ ແລະຄວາມຖືຕົວໄດ້ແລ້ວ ອະທິບາຍວ່າ ຜູ້ມີປັນຍາເຄື່ອງກຳຈັດ ລະ ຄື ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງ

ຄວາມຫຼອກລວງ ແລະຄວາມຖືຕົວ ລວມຄວາມວ່າ ຜູ້ມີປັນຍາເຄື່ອງກຳຈັດ ລະຄວາມຫຼອກລວງ ແລະຄວາມຖືຕົວໄດ້ແລ້ວ

## ວ່າດ້ວຍຄວາມຖືໝັ້ນ ໒ ຢ່າງ

ຄຳວ່າ ຄວາມຖືໝັ້ນ ໃນຄຳວ່າ ຜູ້ມີປັນຍາເຄື່ອງກຳຈັດນັ້ນ ໆລໆ ບໍ່ມີຄວາມຖືໝັ້ນຈະເພິ່ງໄປດ້ວຍເຫດອັນໃດນໍ? ໄດ້ແກ່ ຄວາມຖືໝັ້ນ ໒ ຢ່າງ ຄື (໑) ຄວາມຖືໝັ້ນດ້ວຍອຳນາດຕັນຫາ (໒) ຄວາມຖືໝັ້ນດ້ວຍອຳນາດທິດຖິ ໆລໆ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອຳນາດຕັນຫາ ໆລໆ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອຳນາດທິດຖິ

ຜູ້ມີປັນຍາເຄື່ອງກຳຈັດນັ້ນລະຄວາມຖືໝັ້ນດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຖືໝັ້ນດ້ວຍອຳນາດທິດຖິໄດ້ແລ້ວ ຜູ້ມີປັນຍາເຄື່ອງກຳຈັດນັ້ນ ຊື່ວ່າຜູ້ບໍ່ມີຄວາມຖືໝັ້ນ ຍ້ອນເປັນຜູ້ລະຄວາມຖືໝັ້ນດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມຖືໝັ້ນດ້ວຍອຳນາດທິດຖິໄດ້ແລ້ວຈະເພິ່ງໄປດ້ວຍອຳນາດຣາຄະ ໂທສະ ໂມຫະ ມານະ ທິດຖິ ອຸດທັດຈະ ວິຈິກິດສາ ອະນຸໄສ ອັນໃດນໍ? ວ່າ ເປັນຜູ້ກຳໜັດ ຂັດເຄືອງ ຫຼົງ ຢຶດຕິດ ຢຶດຖື ຟຸ້ງຊ່ານ ລັງເລ ຫຼືຕົກຢູ່ໃນກຳລັງກິເລດ

ຜູ້ມີປັນຍາເຄື່ອງກຳຈັດນັ້ນລະອະພິສັງຂານໄດ້ແລ້ວ ຍ້ອນເປັນຜູ້ລະອະພິສັງຂານໄດ້ແລ້ວ ຈະເພິ່ງໄປສູ່ຄະຕິດ້ວຍເຫດອັນໃດນໍ? ວ່າ ເປັນຜູ້ເກີດໃນນະຮົກ ເກີດໃນກຳເນີດເດຍຣັດສານ ເກີດໃນເຜດວິໄສ ເປັນມະນຸດ ເປັນເທບ ເປັນຜູ້ມີຮູບ ເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼື ເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ຜູ້ມີປັນຍາເຄື່ອງກຳຈັດນັ້ນຈະເພິ່ງໄປດ້ວຍເຫດ ປັດໄຈແລະການໃດ ເຫດ ປັດໄຈແລະການນັ້ນບໍ່ມີ ລວມຄວາມວ່າ ຜູ້ມີປັນຍາເຄື່ອງກຳຈັດນັ້ນ ໆລໆ ບໍ່ມີຄວາມຖືໝັ້ນ ຈະເພິ່ງໄປດ້ວຍເຫດອັນໃດນໍ? ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ທິດຖິທີ່ກຳນົດ (ເພື່ອເກີດ) ໃນພົບນ້ອຍພົບໃຫຍ່
ຂອງຜູ້ມີປັນຍາເຄື່ອງກຳຈັດ ບໍ່ມີໃນບ່ອນໃດ ໆ ໃນໂລກ
ຍ້ອນຜູ້ມີປັນຍາເຄື່ອງກຳຈັດນັ້ນ ລະຄວາມຫຼອກລວງ
ແລະຄວາມຖືຕົວໄດ້ແລ້ວ ບໍ່ມີຄວາມຖືໝັ້ນ
ຈະເພິ່ງໄປດ້ວຍເຫດອັນໃດນໍ?

[໒໒] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍ້ອນວ່າຜູ້ມີຄວາມຖືໝັ້ນຍ່ອມເຂົ້າເຖິງວາທະໃນທຳທັງຫຼາຍ
ຈະເພິ່ງກ່າວຄຳຕິຕຽນຜູ້ບໍ່ມີຄວາມຖືໝັ້ນດ້ວຍເຫດອັນໃດນໍ?

ຍ້ອນຄວາມເຫັນວ່າມີຕົນ ຄວາມເຫັນວ່າບໍ່ມີຕົນ
ບໍ່ມີແກ່ຜູ້ບໍ່ມີຄວາມຖືໝັ້ນນັ້ນ
ຜູ້ບໍ່ມີຄວາມຖືໝັ້ນນັ້ນ ສະລັດແລ້ວເຊິ່ງທິດຖິທັງປວງໃນອັດຕະພາບນີ້

ຄຳວ່າ ຜູ້ມີຄວາມຖືໝັ້ນ ໃນຄຳວ່າ ຍ້ອນວ່າຜູ້ມີຄວາມຖືໝັ້ນຍ່ອມເຂົ້າເຖິງວາທະໃນທຳທັງຫຼາຍ ໄດ້ແກ່ ຄວາມຖືໝັ້ນ ໒ ຢ່າງ ຄື (໑) ຄວາມຖືໝັ້ນດ້ວຍ ອຳນາດຕັນຫາ (໒) ຄວາມຖືໝັ້ນດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອຳນາດທິດຖິ

ຜູ້ມີຄວາມຖືໝັ້ນນັ້ນ ຍັງລະຄວາມຖືໝັ້ນດ້ວຍອຳນາດຕັນຫາບໍ່ໄດ້ ຍັງສະລັດຖິ້ມຄວາມຖືໝັ້ນດ້ວຍອຳນາດທິດຖິບໍ່ໄດ້ ຍ້ອນເປັນຜູ້ລະຄວາມຖືໝັ້ນດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມຖືໝັ້ນດ້ວຍອຳນາດທິດຖິບໍ່ໄດ້ ຜູ້ມີຄວາມຖືໝັ້ນຈຶ່ງເຂົ້າເຖິງວາທະໃນທຳທັງຫຼາຍວ່າ ເປັນຜູ້ກຳໜົດຂັດເຄືອງ ຫຼົງ ຢຶດຕິດ ຢຶດຖື ຟຸ້ງຊ່ານ ລັງເລ ຫຼືຕິກຢູ່ໃນກຳລັງກິເລດ

ຜູ້ມີຄວາມຖືໝັ້ນຍັງລະອະພິສັງຂານເຫຼົ່ານັ້ນບໍ່ໄດ້ ຍ້ອນຍັງເປັນຜູ້ລະອະພິສັງຂານທັງຫຼາຍບໍ່ໄດ້ ຍ່ອມເຂົ້າເຖິງ ຄື ເຂົ້າໄປເຖິງ ຖື ຢຶດໝັ້ນ ຖືໝັ້ນວາທະດ້ວຍຄະຕິວ່າ ເປັນຜູ້ເກີດໃນນະຮົກ ເກີດໃນກຳເນີດເດຍຣັດສານ ເກີດໃນເຜດວິໄສ ເປັນມະນຸດ ເປັນເທບ ເປັນ ຜູ້ມີຮູບເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼື ເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ລວມຄວາມວ່າ ຍ້ອນວ່າຜູ້ມີຄວາມຖືໝັ້ນຍ່ອມເຂົ້າເຖິງວາທະໃນທຳ ທັງຫຼາຍ

ຄຳວ່າ ຈະເພິ່ງກ່າວຄຳຕິຕຽນຜູ້ບໍ່ມີຄວາມຖືໝັ້ນດ້ວຍເຫດອັນໃດນໍ? ອະທິບາຍວ່າ

ຄຳວ່າ ຄວາມຖືໝັ້ນ ໄດ້ແກ່ ຄວາມຖືໝັ້ນ ໒ ຢ່າງ ຄື (໑) ຄວາມຖືໝັ້ນດ້ວຍອຳນາດຕັນຫາ (໒) ຄວາມຖືໝັ້ນດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອຳນາດທິດຖິ

ຜູ້ບໍ່ມີຄວາມຖືໝັ້ນນັ້ນ ລະຄວາມຖືໝັ້ນດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຖືໝັ້ນດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມຖືໝັ້ນດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມຖືໝັ້ນດ້ວຍອຳນາດທິດຖິໄດ້ແລ້ວ ຈະເພິ່ງກ່າວຄຳຕິຕຽນຜູ້ບໍ່ມີຄວາມຖືໝັ້ນ ດ້ວຍອຳນາດຣາຄະ ໂທສະ ໂມຫະ ມານະ ທິດຖິ ອຸດທັດຈະ ວິຈິກິດສາ ອະນຸໄສ ອັນໃດນໍ? ວ່າ ເປັນຜູ້ກຳໜົດ ຂັດເຄືອງ ຫຼົງ ຢຶດຕິດ ຢຶດໝັ້ນ ຟຸ້ງຊ່ານ ລັງເລ ຫຼື ຕິກຢູ່ໃນກຳລັງກິເລດ

ຜູ້ບໍ່ມີຄວາມຖືໝັ້ນລະອະພິສັງຂານເຫຼົ່ານັ້ນໄດ້ແລ້ວ ຍ້ອນເປັນຜູ້ລະອະພິສັງຂານ ທັງຫຼາຍໄດ້ແລ້ວ ຈະເພິ່ງກ່າວເຖິງຄະຕິດ້ວຍເຫດອັນໃດນໍ? ວ່າ ເປັນຜູ້ເກີດໃນນະຮົກ ຯລຯ ເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ຜູ້ມີຄວາມຖືໝັ້ນນັ້ນຈະເພິ່ງກ່າວ ຄື ເວົ້າ ບອກສະແດງ ຊີ້ແຈ່ງດ້ວຍເຫດ ປັດໄຈແລະການໃດ ເຫດ ປັດໄຈ ແລະການນັ້ນບໍ່ມີ ລວມຄວາມວ່າ ຈະເພິ່ງກ່າວຄຳຕິຕຽນຜູ້ບໍ່ມີຄວາມຖືໝັ້ນດ້ວຍເຫດອັນໃດນໍ?

## ວ່າດ້ວຍຄວາມເຫັນວ່າມີຕົນແລະບໍ່ມີຕົນ

ຄຳວ່າ ຄວາມເຫັນວ່າມີຕົນ ໃນຄຳວ່າ ຍ້ອນຄວາມເຫັນວ່າມີຕົນ ຄວາມເຫັນວ່າ ບໍ່ມີຕົນ ບໍ່ມີແກ່ຜູ້ບໍ່ມີຄວາມຖືໝັ້ນນັ້ນ ໄດ້ແກ່ ຄວາມຕາມເຫັນວ່າມີຕົວຕົນ ບໍ່ມີ

ຄຳວ່າ ຄວາມເຫັນວ່າບໍ່ມີຕົນ ໄດ້ແກ່ ຄວາມເຫັນວ່າຂາດສູນ ບໍ່ມີ

ຄຳວ່າ ຄວາມເຫັນວ່າມີຕົນ ໄດ້ແກ່ ສິ່ງທີ່ຖືບໍ່ມີ

ຄຳວ່າ ຄວາມເຫັນວ່າບໍ່ມີຕົນ ອະທິບາຍວ່າ ສິ່ງທີ່ຄວນປ່ອຍ ບໍ່ມີ ຜູ້ໃດມີສິ່ງທີ່ຖືໄວ້ຜູ້ນັ້ນກໍມີສິ່ງທີ່ຄວນປ່ອຍ ຜູ້ໃດມີສິ່ງທີ່ຄວນປ່ອຍ ຜູ້ນັ້ນກໍມີສິ່ງທີ່ຖືໄວ້ ພຣະອະຣະຫັນກ້າວພົ້ນການຖືແລະການປ່ອຍ ລ່ວງພົ້ນຄວາມຈະເລີນ ແລະຄວາມເສື່ອມໄດ້ແລ້ວ ພຣະອະຣະຫັນນັ້ນຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ຜ່ານທາງໄກໄດ້ແລ້ວ ເຖິງທິດ (ນິບພານ) ແລ້ວ ບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ຍ້ອນຄວາມເຫັນວ່າມີຕົນ ຄວາມເຫັນວ່າບໍ່ມີຕົນ ບໍ່ມີແກ່ຜູ້ບໍ່ມີຄວາມຖືໝັ້ນນັ້ນ

ຄຳວ່າ ຜູ້ບໍ່ມີຄວາມຖືໝັ້ນນັ້ນ ສະລັດແລ້ວເຊິ່ງທິດຖິທັງປວງໃນອັດຕະພາບນີ້ແລ ອະທິບາຍວ່າ ທິດຖິ ໖໘ ຜູ້ບໍ່ມີຄວາມຖືໝັ້ນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ບໍ່ມີຄວາມ ຖືໝັ້ນນັ້ນຊື່ວ່າ ສະລັດ ຄື ກຳຈັດ ຂະຈັດ ຂະຈັດອອກ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງທິດຖິທັງປວງໃນອັດຕະພາບນີ້ ລວມຄວາມວ່າ ຜູ້ບໍ່ມີຄວາມຖືໝັ້ນນັ້ນ ສະລັດແລ້ວເຊິ່ງທິດຖິທັງປວງໃນອັດຕະພາບນີ້ແລ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງ ຕັດວ່າ

ຍ້ອນວ່າຜູ້ມີຄວາມຖືໝັ້ນຍ່ອມເຂົ້າເຖິງວາທະໃນທຳທັງຫຼາຍ
ຈະເພິ່ງກ່າວຄຳຕິຕຽນຜູ້ບໍ່ມີຄວາມຖືໝັ້ນ ດ້ວຍເຫດອັນໃດນໍ?
ຍ້ອນຄວາມເຫັນວ່າມີຕົນ ຄວາມເຫັນວ່າບໍ່ມີຕົນ
ບໍ່ມີແກ່ຜູ້ບໍ່ມີຄວາມຖືໝັ້ນນັ້ນ
ຜູ້ບໍ່ມີຄວາມຖືໝັ້ນນັ້ນ ສະລັດແລ້ວເຊິ່ງທິດຖິທັງປວງໃນອັດຕະພາບນີ້

**ທຸດຖັດຖະກະສຸດຕະນິດເທດທີ ໓ ຈົບ**

# ໔. ສຸດທັດຖະກະສຸດຕະນິດເທດ

## ອະທິບາຍສຸດທັດຖະກະສູດ

### ວ່າດ້ວຍຜູ້ພິຈາລະນາເຫັນຄວາມບໍລິສຸດ

ພຣະສາຣີບຸດເຖຣະຈະກ່າວອະທິບາຍສຸດທັດຖະກະສູດ ດັ່ງຕໍ່ໄປນີ້

[໘໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຮົາເຫັນນໍຣະຊົນຜູ້ບໍລິສຸດວ່າ ເປັນຜູ້ບໍ່ມີໂຣກຢ່າງຍິ່ງ
ຄວາມບໍລິສຸດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ
ບຸກຄົນເມື່ອຮູ້ຈິງແນວນີ້ ກໍຮູ້ແລ້ວວ່າຄວາມເຫັນນີ້ປະເສີດ
ຈຶ່ງເປັນຜູ້ຕາມພິຈາລະນາເຫັນຄວາມບໍລິສຸດ
ຍ້ອນເຫດນັ້ນ ຍ່ອມເຊື່ອວ່າຄວາມເຫັນນັ້ນເປັນຍານ

ຄຳວ່າ ເຮົາເຫັນນໍຣະຊົນຜູ້ບໍລິສຸດ ໃນຄຳວ່າ ເຮົາເຫັນນໍຣະຊົນຜູ້ບໍລິສຸດວ່າ ເປັນຜູ້ບໍ່ມີໂຣກຢ່າງຍິ່ງ ອະທິບາຍວ່າ ເຮົາເຫັນ ຄື ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງ ນໍຣະຊົນຜູ້ບໍລິສຸດ

ຄຳວ່າ ເປັນຜູ້ບໍ່ມີໂຣກຢ່າງຍິ່ງ ໄດ້ແກ່ ເຖິງຄວາມປອດໂຣກ ເຖິງທຳອັນກະເສມ ເຖິງທຳເຄື່ອງປ້ອງກັນ ເຖິງທຳເປັນທີ່ປົກປ້ອງ ເຖິງທຳເປັນທີ່ເພິ່ງ ເຖິງທຳເປັນທີ່ໄປໃນເບື້ອງໜ້າ ເຖິງຄວາມປອດໄພ ເຖິງທຳທີ່ບໍ່ຈຸຕິ ເຖິງທຳທີ່ບໍ່ຕາຍ ເຖິງທຳເປັນທີ່ດັບເຢັນອັນປະເສີດ ລວມຄວາມວ່າ ເຮົາເຫັນນໍຣະຊົນຜູ້ບໍລິສຸດວ່າ ເປັນຜູ້ບໍ່ມີໂຣກຢ່າງຍິ່ງ

ຄຳວ່າ ຄວາມບໍລິສຸດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ ອະທິບາຍວ່າ ຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ່ອມມີແກ່ ນໍຣະຊົນຍ້ອນການເຫັນຮູບດ້ວຍຈັກຂຸວິນຍານ ນໍຣະຊົນຍ່ອມບໍລິສຸດ ຄື ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼຸດພົ້ນໄປ ຍ້ອນການເຫັນຮູບດ້ວຍຈັກຂຸວິນຍານ ລວມຄວາມວ່າ ຄວາມບໍລິສຸດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ

ຄຳວ່າ ເມື່ອຮູ້ຈິງແນວນີ້ ກໍຮູ້ແລ້ວວ່າຄວາມເຫັນນີ້ປະເສີດ ອະທິບາຍວ່າ ເມື່ອຮູ້ຈິງ ຄື ຮູ້ທົ່ວ ຮູ້ແຈ່ມແຈ້ງ ຮູ້ສະເພາະ ແທງຕະຫຼອດແນວນີ້ ກໍຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ຄວາມເຫັນນີ້ ຢ້ຽມ ຄື ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ລວມຄວາມວ່າ ເມື່ອຮູ້ຈິງແນວນີ້ ກໍຮູ້ແລ້ວວ່າຄວາມເຫັນນີ້ປະເສີດ

ຄຳວ່າ ຈຶ່ງເປັນຜູ້ຕາມພິຈາລະນາເຫັນຄວາມມົດຈົດ ຍ້ອນເຫດນັ້ນ ຍ່ອມເຊື່ອວ່າ ຄວາມເຫັນນັ້ນເປັນຍານ ອະທິບາຍວ່າ ຜູ້ໃດເຫັນນໍຣະຊົນຜູ້ມົດຈົດ ຜູ້ນັ້ນ ຊື່ວ່າເປັນຜູ້ຕາມພິຈາລະນາເຫັນຄວາມມົດຈົດ

ຄຳວ່າ ຍ່ອມເຊື່ອວ່າ ຄວາມເຫັນນັ້ນເປັນຍານ ອະທິບາຍວ່າ ຍ່ອມເຊື່ອການເຫັນຮູບດ້ວຍຈັກຂຸວິນຍານວ່າ ເປັນຍານ ເປັນມັກ ເປັນທາງ ເປັນທາງນຳອອກຈາກທຸກ ລວມຄວາມວ່າ ຈຶ່ງເປັນຜູ້ຕາມພິຈາລະນາເຫັນຄວາມມົດຈົດ ຍ້ອນເຫດນັ້ນ ຍ່ອມເຊື່ອວ່າ ຄວາມເຫັນນັ້ນເປັນຍານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຮົາເຫັນນໍຣະຊົນຜູ້ມົດຈົດວ່າ ເປັນຜູ້ບໍ່ມີໂຣກຢ່າງຍິ່ງ
ຄວາມມົດຈົດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ
ບຸກຄົນເມື່ອຮູ້ຈິງແນວນີ້ ກໍຮູ້ແລ້ວວ່າຄວາມເຫັນນີ້ປະເສີດ
ຈຶ່ງເປັນຜູ້ຕາມພິຈາລະນາເຫັນຄວາມມົດຈົດ
ຍ້ອນເຫດນັ້ນ ຍ່ອມເຊື່ອວ່າຄວາມເຫັນນັ້ນເປັນຍານ

[໘໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຖ້າຄວາມມົດຈົດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ
ຫຼືຖ້ານໍຣະຊົນນັ້ນລະທຸກໄດ້ຍ້ອນຍານ
ນໍຣະຊົນຜູ້ຍັງມີອຸປະທິນັ້ນ ຍ່ອມມົດຈົດຍ້ອນມັກອື່ນ (ກໍໄດ້)
ຍ້ອນວ່າທິດຖິຍ່ອມບົ່ງບອກເຖິງນໍຣະຊົນນັ້ນຜູ້ເວົ້າແນວນັ້ນ

## ວ່າດ້ວຍຄວາມມົດຈົດເປັນຕົ້ນ

ຄຳວ່າ ຖ້າຄວາມມົດຈົດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ ອະທິບາຍວ່າ ຖ້າຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ່ອມມີແກ່ນໍຣະຊົນຍ້ອນການເຫັນຮູບດ້ວຍຈັກຂຸວິນຍານ ນໍຣະຊົນຍ່ອມມົດຈົດ ຄື ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼຸດພົ້ນໄປຍ້ອນການເຫັນຮູບດ້ວຍຈັກຂຸວິນຍານ ລວມຄວາມວ່າ ຖ້າຄວາມມົດຈົດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ

ຄຳວ່າ ຫຼືຖ້ານໍຣະຊົນນັ້ນລະທຸກໄດ້ຍ້ອນຍານ ອະທິບາຍວ່າ ຖ້ານໍຣະຊົນນັ້ນ ລະຊາດທຸກ (ທຸກຍ້ອນຄວາມເກີດ) ຊະຣາທຸກ (ທຸກຍ້ອນຄວາມແກ່) ພະຍາທິທຸກ(ທຸກຍ້ອນຄວາມເຈັບປ່ວຍ) ມໍຣະນະທຸກ (ທຸກຍ້ອນຄວາມຕາຍ) ທຸກຄືໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກຂະ (ຄວາມທຸກກາຍ) ໂທມະນັດ(ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ຍ້ອນການເຫັນຮູບດ້ວຍຈັກຂຸວິນຍານ ລວມຄວາມວ່າ ຫຼືຖ້ານໍຣະຊົນນັ້ນລະທຸກໄດ້ຍ້ອນຍານ

ຄຳວ່າ ນໍຣະຊົນຜູ້ຍັງມີອຸປະທິນັ້ນ ຍ່ອມມົດຈົດຍ້ອນມັກອື່ນ (ກໍໄດ້) ອະທິບາຍວ່າ ນໍຣະຊົນຍ່ອມມົດຈົດ ຄື ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼຸດພົ້ນໄປຍ້ອນມັກອື່ນ ຄືມັກທີ່ບໍ່ມົດຈົດ ປະຕິປະທາທີ່ຜິດ ທາງທີ່ບໍ່ແມ່ນນຳອອກຈາກທຸກ ນອກຈາກສະຕິປັດຖານ ສຳມັບປະທານະ ອິດທິບາດ ອິນຊີ ພະລະ ໂພດຊົງ ອະຣິຍະມັກມີອົງ ໘

ຄຳວ່າ ຜູ້ຍັງມີອຸປະທິ ໄດ້ແກ່ ຜູ້ຍັງມີຣາຄະ ຍັງມີໂທສະ ຍັງມີໂມຫະ ຍັງມີມານະ ຍັງມີຕັນຫາ ຍັງມີທິດຖິ ຍັງມີກິເລດ ຍັງມີອຸປາທານ ລວມຄວາມວ່າ ນໍຣະຊົນຜູ້ຍັງມີອຸປະ ທິນັ້ນຍ່ອມມົດຈົດຍ້ອນມັກອື່ນ (ກໍໄດ້)

ຄຳວ່າ ຍ້ອນວ່າທິດຖິຍ່ອມບົ່ງບອກເຖິງນໍຣະຊົນນັ້ນຜູ້ເວົ້າແນວນັ້ນ ອະທິບາຍວ່າ ທິດຖິນັ້ນບົ່ງບອກເຖິງບຸກຄົນນັ້ນວ່າ ບຸກຄົນນີ້ເປັນມິດສາທິດຖິ ມີຄວາມເຫັນວິປະຣິດດ້ວຍປະການແນວນີ້

ຄຳວ່າ ຜູ້ເວົ້າແນວນັ້ນ ໄດ້ແກ່ ຜູ້ເວົ້າ ຄື ກ່າວ ບອກ ສະແດງ ຊີ້ແຈ່ງແນວນັ້ນວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຯລຯ ຜູ້ເວົ້າ ຄື ກ່າວ ບອກ ສະແດງ ຊີ້ແຈ່ງຢ່າງນັ້ນວ່າ ໂລກບໍ່ທ່ຽງ ຯລຯ ໂລກມີທີ່ສຸດ ຯລຯ ໂລກບໍ່ມີທີ່ສຸດ ຯລຯ ຊີວະກັບສະຣີຣະເປັນຢ່າງດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ຍ້ອນວ່າທິດຖິຍ່ອມບົ່ງບອກເຖິງນໍຣະຊົນນັ້ນຜູ້ເວົ້າແນວນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຖ້າຄວາມມົດຈົດຍ່ອມມີແກ່ນໍຣະຊົນຍ້ອນຄວາມເຫັນ
ຫຼືຖ້ານໍຣະຊົນນັ້ນລະທຸກໄດ້ຍ້ອນຍານ
ນໍຣະຊົນຜູ້ຍັງມີອຸປະທິນັ້ນ ຍ່ອມມົດຈົດຍ້ອນມັກອື່ນ (ກໍໄດ້)
ຍ້ອນວ່າທິດຖິຍ່ອມບົ່ງບອກເຖິງນໍຣະຊົນນັ້ນຜູ້ເວົ້າແນວນັ້ນ

[໔໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພາມບໍ່ກ່າວຄວາມມົດຈົດໃນຮູບທີ່ເຫັນ
ສຽງທີ່ໄດ້ຍິນ ສິນແລະຂໍ້ວັດ ຫຼືອາລົມທີ່ຮັບຮູ້ໂດຍມັກອື່ນ
ພາມນັ້ນຜູ້ບໍ່ເຂົ້າໄປຕິດໃນບຸນແລະບາບ ລະຕົນໄດ້
ຮຽກວ່າ ຜູ້ບໍ່ເຮັດເພີ່ມເຕີມໃນໂລກນີ້

ຄຳວ່າ ບໍ່ ໃນຄຳວ່າ ພາມບໍ່ກ່າວຄວາມມົດຈົດໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ສິນແລະຂໍ້ວັດ ຫຼື ອາລົມທີ່ຮັບຮູ້ໂດຍມັກອື່ນ ເປັນຄຳປະຕິເສດ

ຄຳວ່າ ພາມ ອະທິບາຍວ່າ ທີ່ຊື່ວ່າພາມ ຍ້ອນລອຍທຳ ໗ ປະການ ໄດ້ແລ້ວ ຄື

໑. ລອຍ ສັກກາຍະທິດຖິໄດ້ແລ້ວ
໒. ລອຍ ວິຈິກິດສາໄດ້ແລ້ວ
໓. ລອຍ ສີລັບພະຕະປະຣາມາດໄດ້ແລ້ວ
໔. ລອຍ ຣາຄະໄດ້ແລ້ວ
໕. ລອຍ ໂທສະໄດ້ແລ້ວ
໖. ລອຍ ໂມຫະໄດ້ແລ້ວ
໗. ລອຍ ມານະໄດ້ແລ້ວ

ຄື ພາມລອຍບາບອະກຸສົນທຳເຊິ່ງເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ມໍຣະນະ ຕໍ່ໄປ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສະພິຍະ)

ບຸກຄົນຜູ້ລອຍບາບທັງປວງໄດ້ແລ້ວ
ເປັນຜູ້ປາສະຈາກມົນທິນ ເປັນຜູ້ປະເສີດ
ມີຈິດຕັ້ງໝັ້ນດ້ວຍສະມາທິ ດຳຣົງຕົນໝັ້ນຄົງ
ຂ້າມພົ້ນສັງສາຣະວັດ ເປັນຜູ້ບໍລິສຸດບໍລິບູນ
ບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ
ບັນດິດຮຽກຜູ້ນັ້ນວ່າເປັນພາມ

## ວ່າດ້ວຍຄວາມເຊື່ອຖືວ່າ ເປັນມຸງຄຸນ ບໍ່ເປັນມຸງຄຸນ

ຄຳວ່າ ພາມບໍ່ກ່າວຄວາມບໍລິສຸດ ໗ລ໗ ໂດຍມັກອື່ນ ອະທິບາຍວ່າ ພາມບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ໂດຍມັກອື່ນ ຄື ມັກທີ່ບໍ່ບໍລິສຸດ ປະຕິປະທາທີ່ຜິດ ທາງທີ່ບໍ່ແມ່ນນຳອອກຈາກທຸກ ນອກຈາກສະຕິປັດຖານ ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງ ອະຣິຍະມັກມີອົງ ໘ ລວມຄວາມວ່າ ພາມບໍ່ກ່າວຄວາມບໍລິສຸດ ໗ລ໗ ໂດຍມັກອື່ນ

ຄຳວ່າ ໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ສີນແລະຂໍ້ວັດ ຫຼື ອາລົມທີ່ຮັບຮູ້ ອະທິບາຍວ່າ ມີສະມະນະພາມພວກໜຶ່ງ ຖືຄວາມບໍລິສຸດດ້ວຍການເຫັນ ສະມະນະພາມເຫຼົ່ານັ້ນຖືການເຫັນຮູບບາງຢ່າງວ່າ ເປັນມຸງຄຸນ ຖືການເຫັນຮູບບາງຢ່າງວ່າ ບໍ່ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນ ຖືການເຫັນຮູບຊະນິດໃດວ່າ ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນລຸກຂຶ້ນແຕ່ເຊົ້າມືດ ເຫັນຮູບທີ່ສົມມຸດວ່າ ເປັນມຸງຄຸນຍິ່ງ ຄື ເຫັນນົກແອ່ນລົມ ໝາກຕູມອ່ອນເກີດໃນບຸເຣິກຍາມ ຍິງຖືພາ ເດັກນ້ອຍທີ່ຂີ່ຄໍຄົນໄປ ໝໍ້ມີນໍ້າເຕັມ ປາວຽນໄຟ ມ້າອາຊາໄນ ລົດທຽມມ້າອາຊາໄນ ງົວຜູ້ ງົວແດງ ກໍພາກັນຖືການເຫັນຮູບເຫັນປານນີ້ວ່າ ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນ ຖືການເຫັນຮູບຊະນິດໃດວ່າ ບໍ່ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນ ເຫັນກອງເຟືອງ ໝໍ້ນໍ້າມັນປຽງ ໝໍ້ເປົ່າ ນັກຟ້ອນ ສະມະນະເປືອຍ ລາ ຍານທຽມດ້ວຍລາ ຍານທຽມດ້ວຍສັດພາຫະນະຕົວດຽວ ຄົນຕາບອດ ຄົນງ່ອຍ ຄົນແຄະ ຄົນເປ້ຍ ຄົນແກ່ ຄົນເຈັບ ຄົນຕາຍ ກໍພາກັນຖືການເຫັນຮູບເຫັນປານນີ້ວ່າ ບໍ່ເປັນມຸງຄຸນ

ສະມະນະພາມເຫຼົ່ານີ້ນັ້ນ ຊື່ວ່າຖືຄວາມມົດຈິດດ້ວຍການເຫັນ ສະມະນະພາມເຫຼົ່ານັ້ນຖືຄວາມມົດຈິດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ດ້ວຍຮູບທີ່ເຫັນແລ້ວ

ມີສະມະນະພາມພວກໜຶ່ງ ຖືຄວາມມົດຈິດດ້ວຍສຽງທີ່ໄດ້ຍິນ ສະມະນະພາມ ເຫຼົ່ານັ້ນຖືການໄດ້ຍິນສຽງບາງຢ່າງວ່າ ເປັນມຸງຄຸນ ຖືການໄດ້ຍິນສຽງບາງຢ່າງວ່າ ບໍ່ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນ ຖືການໄດ້ຍິນສຽງຢ່າງໃດວ່າ ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນລຸກຂຶ້ນແຕ່ເຊົ້າມືດ ໄດ້ຍິນສຽງທີ່ສົມມຸດວ່າເປັນມຸງຄຸນຍິ່ງວ່າ ຈະເລີນແລ້ວ ກຳລັງຈະເລີນ ເຕັມ ຂາວ ບໍ່ເສົ້າໂສກ ໃຈດີ ເລີກດີ ມຸງຄຸນດີ ມີສິຣິ ຫຼື ວ່າ ຈະເລີນສິຣິ ກໍພາກັນຖືການໄດ້ຍິນສຽງເຫັນປານນີ້ວ່າ ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນ ຖືການໄດ້ຍິນສຽງຢ່າງໃດວ່າ ບໍ່ເປັນມຸງຄຸນ

ສະມະນະພາມເຫຼົ່ານັ້ນລຸກຂຶ້ນແຕ່ເຊົ້າມືດ ໄດ້ຍິນສຽງວ່າຄົນຕາບອດ ຄົນງ່ອຍ ຄົນແຄະ ຄົນເປ້ຍ ຄົນແກ່ ຄົນເຈັບ ຄົນຕາຍ ຖືກຕັດ ຖືກທຸບ ຖືກໄຟໄໝ້ ຂອງຫາຍ ຫຼື ວ່າບໍ່ມີ ກໍພາກັນຖືການໄດ້ຍິນສຽງເຫັນປານນັ້ນວ່າ ບໍ່ເປັນມຸງຄຸນ ສະມະນະພາມເຫຼົ່ານີ້ນັ້ນ ຊື່ວ່າຖືຄວາມມົດຈິດດ້ວຍການໄດ້ຍິນສຽງ ສະມະນະພາມເຫຼົ່ານັ້ນຖືຄວາມມົດຈິດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ດ້ວຍການໄດ້ຍິນສຽງ

## ວ່າດ້ວຍຄວາມມົດຈິດດ້ວຍສີນແລະຂໍ້ວັດ

ມີສະມະນະພາມພວກໜຶ່ງ ຖືຄວາມມົດຈິດດ້ວຍສີນ ສະມະນະພາມເຫຼົ່ານັ້ນຖືຄວາມມົດຈິດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ດ້ວຍເຫດພຽງສີນ ຄື ດ້ວຍເຫດພຽງຄວາມສັງລວມ ດ້ວຍເຫດພຽງຄວາມສັງວອນ ດ້ວຍເຫດພຽງຄວາມບໍ່ລະເມີດ

ປະຣິພາຊິກຜູ້ເປັນບຸດແຫ່ງນາງປະຣິພາຊິກາຊື່ສະມະນະມຸນທິກາ ກ່າວແນວນີ້ວ່າ ຊ່າງໄມ້ເອີຍ ເຮົາບັນຍັດບຸຣຸດບຸກຄົນ ຜູ້ປະກອບດ້ວຍທຳ ໔ ປະການວ່າ ເປັນຜູ້ມີກຸສົນພຽບພ້ອມ ມີກຸສົນປະເສີດ ບັນລຸເຖິງອະຣະຫັດຕະຜົນອັນອຸດົມທີ່ຄວນບັນລຸ ເປັນສະມະນະ ບໍ່ມີໃຜສູ້ໄດ້ ທຳ ໔ ປະການ ອັນໃດແດ່ ຄື ຊ່າງໄມ້ເອີຍ ບຸກຄົນເຊັ່ນນັ້ນໃນໂລກນີ້

໑. ຍ່ອມບໍ່ເຮັດກຳຊົ່ວຊ້າທາງກາຍ
໒. ບໍ່ກ່າວວາຈາຊົ່ວຊ້າ
໓. ບໍ່ດຳຣິຄວາມດຳຣິຊົ່ວຊ້າ
໔. ບໍ່ປະກອບອາຊີບຊົ່ວຊ້າ

ຊ່າງໄມ້ເອີຍ ເຮົາບັນຍັດບຸຣຸດບຸກຄົນ ຜູ້ປະກອບດ້ວຍທຳ ໔ ປະການເຫຼົ່ານີ້ແລວ່າ ເປັນຜູ້ມີກຸສົນພຽບພ້ອມ ມີກຸສົນປະເສີດ ຜູ້ບັນລຸເຖິງອະຣະຫັດຕະຜົນອັນອຸດົມທີ່ຄວນບັນລຸ ເປັນສະມະນະ ບໍ່ມີໃຜສູ້ໄດ້

ມີສະມະນະພາມພວກໜຶ່ງ ຖືຄວາມມົດຈົດດ້ວຍສິນແນວນີ້ແລ ສະມະນະພາມ ເຫຼົ່ານັ້ນຖືຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປດ້ວຍເຫດພຽງສິນ ດ້ວຍເຫດພຽງຄວາມສັງລວມ ດ້ວຍເຫດພຽງຄວາມສັງວອນ ດ້ວຍເຫດພຽງຄວາມບໍ່ລ່ວງລະເມີດ

ມີສະມະນະພາມພວກໜຶ່ງ ຖືຄວາມມົດຈົດດ້ວຍຂໍ້ວັດ ສະມະນະພາມເຫຼົ່ານັ້ນ ເປັນຜູ້ປະພຶດຂໍ້ວັດຢ່າງຊ້າງແດ່ ປະພຶດຂໍ້ວັດຢ່າງມ້າແດ່ ປະພຶດຂໍ້ວັດຢ່າງງົວແດ່ ປະພຶດຂໍ້ວັດຢ່າງໝາແດ່ ປະພຶດຂໍ້ວັດຢ່າງກາແດ່ ປະພຶດຂໍ້ວັດຢ່າງທ້າວວາສຸເທບແດ່ ປະພຶດຂໍ້ວັດຢ່າງພົນເທບແດ່ ປະພຶດຂໍ້ວັດຢ່າງປຸນນະພັດທະຣະແດ່ ປະພຶດຂໍ້ວັດຢ່າງມະນິພັດທະຣະແດ່ ປະພຶດຂໍ້ວັດຄືການບູຊາໄຟແດ່ ປະພຶດຂໍ້ວັດຢ່າງນາກແດ່ ປະພຶດຂໍ້ວັດຢ່າງຄຸດແດ່ ປະພຶດຂໍ້ວັດຢ່າງຍັກແດ່ ປະພຶດຂໍ້ວັດຢ່າງອະສູນແດ່ ປະພຶດຂໍ້ວັດຢ່າງຄົນທັນແດ່ ປະພຶດຂໍ້ວັດຢ່າງທ້າວມະຫາຣາດແດ່ ປະພຶດຂໍ້ວັດ ຢ່າງພຣະຈັນແດ່ ປະພຶດຂໍ້ວັດຢ່າງພຣະອາທິດແດ່ ປະພຶດຂໍ້ວັດຢ່າງພຣະອິນແດ່ ປະພຶດຂໍ້ວັດຢ່າງພຣະພົມແດ່ ປະພຶດຂໍ້ວັດຢ່າງເທບແດ່ ປະພຶດຂໍ້ວັດຄື ການໄຫວ້ທິດແດ່ ສະມະນະພາມເຫຼົ່ານີ້ນັ້ນ ຊື່ວ່າຜູ້ຖືຄວາມມົດຈົດດ້ວຍຂໍ້ວັດ ສະມະນະພາມເຫຼົ່ານັ້ນຖືຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປດ້ວຍຂໍ້ວັດ

ມີສະມະນະພາມພວກໜຶ່ງ ຖືຄວາມມົດຈົດດ້ວຍອາລົມທີ່ຮັບຮູ້ ສະມະນະພາມເຫຼົ່ານັ້ນລຸກຂຶ້ນແຕ່ເຊົ້າມືດ ຈັບຕ້ອງແຜ່ນດິນ ຈັບຕ້ອງພຶດສີຂຽວ ຈັບຕ້ອງມູນງົວ ຈັບຕ້ອງຮອຍເຕົ່າຢຽບຜານ ຈັບຕ້ອງກວຽນບັນທຸກງາ ຫຍ້ຳກິນງາຂາວ ທານ້ຳມັນສີຂາວ ຫຍ້ຳໄມ້ຖູແຂ້ວຂາວ ອາບນ້ຳຊະໂລມດ້ວຍດິນສໍພອງ ນຸ່ງຜ້າຂາວ ໂພກຜ້າຂາວ ສະມະນະພາມເຫຼົ່ານີ້ນັ້ນ ຊື່ວ່າຖືຄວາມມົດ

ຈິດດ້ວຍອາລົມທີ່ຮັບຮູ້ ສະມະນະພາມເຫຼົ່ານັ້ນຖືຄວາມມົດຈິດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປດ້ວຍ ອາລົມທີ່ຮັບຮູ້ແລ້ວ ລວມຄວາມວ່າ ພາມບໍ່ກ່າວຄວາມມົດຈິດ ໆລໆ ໂດຍມັກອື່ນ

ຄຳວ່າ ໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ສິນຂໍ້ວັດ ຫຼືອາລົມທີ່ຮັບຮູ້ ອະທິບາຍວ່າ ພາມບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມມົດຈິດ ໂດຍຖືຄວາມມົດຈິດດ້ວຍຮູບທີ່ ເຫັນແດ່ ໂດຍຖືຄວາມມົດຈິດດ້ວຍສຽງທີ່ໄດ້ຍິນແດ່ ໂດຍຖືຄວາມມົດຈິດດ້ວຍສີນແດ່ ໂດຍຖືຄວາມມົດຈິດດ້ວຍຂໍ້ວັດແດ່ ໂດຍຖືຄວາມມົດຈິດດ້ວຍອາລົມທີ່ຮັບຮູ້ແດ່ ລວມຄວາມວ່າ ພາມບໍ່ກ່າວຄວາມມົດຈິດໃນຮູບທີ່ເຫັນ ສຽງ ທີ່ໄດ້ຍິນ ສິນຂໍ້ວັດ ຫຼື ອາລົມທີ່ຮັບຮູ້ ໂດຍ ມັກອື່ນ

## ວ່າດ້ວຍການລະບຸນແລະບາບ

ຄຳວ່າ ຜູ້ບໍ່ເຂົ້າໄປຕິດໃນບຸນແລະບາບ ອະທິບາຍວ່າ ກຸສະລາພິສັງຂານ ເປັນເຫດໃຫ້ເກີດໃນໂລກທາດ ໓ ແນວໃດແນວໜຶ່ງ ຕັດຮຽກວ່າບຸນ ອະກຸສົນທຸກຂະນິດ ຕັດຮຽກວ່າສິ່ງທີ່ບໍ່ແມ່ນບຸນ

ປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະອາເນນຊາພິສັງຂານ ເປັນສິ່ງທີ່ພາມນັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ໃນການໃດ ໃນການນັ້ນ ພາມນັ້ນ ຍ່ອມບໍ່ຕິດ ບໍ່ຕິດພັນ ບໍ່ເຂົ້າໄປຕິດໃນບຸນແລະບາບ ໄດ້ແກ່ ເປັນຜູ້ບໍ່ຕິດແລ້ວ ບໍ່ຕິດພັນແລ້ວ ບໍ່ເຂົ້າໄປຕິດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ(ຈາກກິເລດ)ຢູ່ ລວມຄວາມວ່າ ຜູ້ບໍ່ເຂົ້າໄປຕິດໃນບຸນແລະບາບ

## ວ່າດ້ວຍການລະຕົນ

ຄຳວ່າ ລະຕົນໄດ້ ໃນຄຳວ່າ ລະຕົນໄດ້ ຮຽກວ່າ ຜູ້ບໍ່ເຮັດເພີ່ມເຕີມໃນໂລກນີ້ ໄດ້ແກ່ ລະຄວາມເຫັນວ່າ ເປັນຕົນ

ຄຳວ່າ ລະຕົນໄດ້ ໄດ້ແກ່ ລະຄວາມຍຶດໝັ້ນຖືໝັ້ນ

ອີກໄນໜຶ່ງ ຄຳວ່າ ລະຕົນໄດ້ ອະທິບາຍວ່າ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອ ດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິທັງປວງ ເປັນສິ່ງທີ່ພາມນັ້ນສະລະແລ້ວ ຄາຍແລ້ວ ປ່ອຍແລ້ວ ລະແລ້ວ ສະລັດຖິ້ມແລ້ວ

ຄຳວ່າ ຮຽກວ່າ ຜູ້ບໍ່ເຮັດເພີ່ມເຕີມໃນໂລກນີ້ ອະທິບາຍວ່າ ຮຽກວ່າ ຜູ້ບໍ່ເຮັດເພີ່ມເຕີມ ຄືບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ເຊິ່ງປຸນຍາພິສັງຂານ ອະປຸນຍາພິສັງ

ຂານ ຫຼືອາເນນຊາພິສັງຂານ ລວມຄວາມວ່າ ລະຕົນໄດ້ ຮຽກວ່າຜູ້ບໍ່ເຮັດ ເພີ່ມເຕີມໃນໂລກນີ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພາມບໍ່ກ່າວຄວາມບໍລິສຸດໃນຮູບທີ່ເຫັນ
ສຽງທີ່ໄດ້ຍິນ ສີນແລະຂໍ້ວັດ ຫຼື ອາລົມທີ່ຮັບຮູ້ໂດຍມັກອື່ນ
ພາມນັ້ນຜູ້ບໍ່ເຂົ້າໄປຕິດໃນບຸນແລະບາບ ລະຕົນໄດ້
ຮຽກວ່າ ຜູ້ບໍ່ເຮັດເພີ່ມເຕີມໃນໂລກນີ້

[໘໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສະມະນະພາມເຫຼົ່ານັ້ນລະສິ່ງທຳອິດ ອາໄສສິ່ງຫຼັງ
ໄປຕາມຄວາມພຸ່ງພ່ານ ຍ່ອມຂ້າມກິເລດເຄື່ອງຂ້ອງບໍ່ໄດ້
ສະມະນະພາມເຫຼົ່ານັ້ນ ຍ່ອມຍຶດຖື ຍ່ອມສະລັດຖິ້ມ
ເໝືອນລີງຈັບງ່າໄມ້ແລ້ວກໍວາງສັນນັ້ນ
ວ່າດ້ວຍການຈັບ ໆ ວາງ ໆ ພົ້ນກິເລດບໍ່ໄດ້

ຄຳວ່າ ລະສິ່ງທຳອິດ ອາໄສສິ່ງຫຼັງ ອະທິບາຍວ່າ ສະມະນະພາມເຫຼົ່ານັ້ນລະ ສາດສະດາອົງກ່ອນ ອາໄສ ຄື ອີງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອສາດສະດາອົງ ຕໍ່ມາ ລະທຳທີ່ສາດສະດາກ່າວສອນຄັ້ງທຳອິດ ອາໄສ ຯລຯ ທຳທີ່ສາດສະດາກ່າວສອນຄັ້ງ ຕໍ່ມາ ລະໝູ່ຄະນະທຳອິດ ອາໄສ ຯລຯ ໝູ່ຄະນະຕໍ່ມາ ລະທິດຖິທຳອິດ ອາໄສ ຯລຯ ທິດຖິຕໍ່ມາ ລະປະຕິປະທາທຳອິດ ອາໄສ ຯລຯ ປະຕິປະທາຕໍ່ມາ ລະມັກທຳອິດ ອາໄສ ຄື ອີງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອມັກຕໍ່ມາ ລວມຄວາມວ່າ ລະສິ່ງທຳອິດ ອາໄສສິ່ງຫຼັງ

ຄຳວ່າ ສະມະນະພາມເຫຼົ່ານັ້ນ ຯລຯ ໄປຕາມຄວາມພຸ່ງພ່ານ ຍ່ອມຂ້າມກິເລດເຄື່ອງຂ້ອງບໍ່ໄດ້ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມພຸ່ງພ່ານ ຄື ຄວາມ ກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ[๑]

ຄຳວ່າ ໄປຕາມຄວາມພຸ່ງພ່ານ ອະທິບາຍວ່າ ໄປຕາມຄວາມພຸ່ງພ່ານ ຄື ຕົກໄປຕາມຄວາມພຸ່ງພ່ານ ຊ່ານໄປຕາມຄວາມພຸ່ງພ່ານ ຈົມລົງໃນຄວາມພຸ່ງພ່ານ ໄດ້ແກ່ ຖືກຄວາມພຸ່ງພ່ານຍູ້ໃຫ້ຕົກໄປ ຖືກຄວາມພຸ່ງພ່ານຄອບງຳ ມີຈິດຖືກຄວາມພຸ່ງພ່ານຍຶດຄອງ

ຄຳວ່າ ສະມະນະພາມເຫຼົ່ານັ້ນ ຯລຯ ຍ່ອມຂ້າມກິເລດເຄື່ອງຂ້ອງບໍ່ໄດ້ ໄດ້ແກ່ ຍ່ອມຂ້າມບໍ່ໄດ້ ຄື ຂ້າມໄປບໍ່ໄດ້ ຂ້າມພົ້ນບໍ່ໄດ້ ກ້າວລ່ວງບໍ່ໄດ້ ລ່ວງເລີຍບໍ່ໄດ້ ເຊິ່ງກິເລດເຄື່ອງຂ້ອງຄືຣາຄະ ກິເລດເຄື່ອງຂ້ອງຄືໂທສະ ກິເລດເຄື່ອງຂ້ອງຄືໂມຫະ ກິເລດເຄື່ອງຂ້ອງຄືມານະ ກິເລດເຄື່ອງຂ້ອງຄືທິດຖິ ກິເລດອັນເປັນເຄື່ອງກ່ຽວຂ້ອງ ກິເລດເຄື່ອງຂ້ອງຄືທຸດຈະຣິດ ລວມຄວາມວ່າ ສະມະນະພາມເຫຼົ່ານັ້ນ ຯລຯ ໄປຕາມຄວາມພຸ່ງພ່ານ ຍ່ອມຂ້າມກິເລດເຄື່ອງຂ້ອງບໍ່ໄດ້

ຄຳວ່າ ສະມະນະພາມເຫຼົ່ານັ້ນ ຍ່ອມຢຶດຖື ຍ່ອມສະລັດຖິ້ມ ອະທິບາຍວ່າ ສະມະນະພາມເຫຼົ່ານັ້ນ ຖືສາດສະດາ ປ່ອຍສາດສະດານັ້ນແລ້ວກໍຖືສາດສະດາອົງອື່ນ ຖືທຳທີ່ສາດສະດາກ່າວສອນ ປ່ອຍທຳນັ້ນແລ້ວກໍຖືທຳທີ່ສາດສະດາກ່າວສອນອື່ນ ຖືໝູ່ຄະນະ ປ່ອຍໝູ່ຄະນະນັ້ນແລ້ວກໍຖືໝູ່ຄະນະອື່ນ ຖືທິດຖິ ປ່ອຍທິດຖິນັ້ນແລ້ວກໍຖືທິດຖິອື່ນ ຖືປະຕິປະທາ ປ່ອຍປະຕິປະທານັ້ນແລ້ວ ກໍຖືປະຕິປະທາອື່ນ ຖືມັກ ປ່ອຍມັກນັ້ນແລ້ວກໍຖືມັກອື່ນ ຄື ຍ່ອມຖືແລະຍ່ອມປ່ອຍ ຊື່ວ່າຍ່ອມຢຶດຖື ແລະຍ່ອມສະລັດຖິ້ມ ລວມຄວາມວ່າ ສະມະນະພາມເຫຼົ່ານັ້ນ ຍ່ອມຢຶດຖື ຍ່ອມສະລັດຖິ້ມ

ຄຳວ່າ ເໝືອນລິງຈັບງ່າໄມ້ແລ້ວກໍປ່ອຍສະນັ້ນ ອະທິບາຍວ່າ ລິງທ່ຽວໄປໃນປ່າດົງໃຫຍ່ ຈັບງ່າໄມ້ແລ້ວ ປ່ອຍງ່ານັ້ນກໍຈັບງ່າອື່ນ ປ່ອຍງ່ານັ້ນແລ້ວກໍຈັບງ່າອື່ນ ສັນໃດ ສະມະນະພາມເປັນຈຳນວນຫຼາຍຍ່ອມຖື ແລະຍ່ອມປ່ອຍທິດຖິທັງຫຼາຍນັ້ນ ຊື່ວ່າຍ່ອມຢຶດຖືແລະຍ່ອມສະລັດຖິ້ມທິດຖິທັງຫຼາຍ ສັນນັ້ນຄືກັນ ລວມຄວາມວ່າ ເໝືອນລິງຈັບງ່າໄມ້ແລ້ວກໍປ່ອຍແນວນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສະມະນະພາມເຫຼົ່ານັ້ນລະສິ່ງທຳອິດ ອາໄສສິ່ງຫຼັງ
ໄປຕາມຄວາມພຸ່ງພ່ານ
ຍ່ອມຂ້າມກິເລດເຄື່ອງຂ້ອງບໍ່ໄດ້
ສະມະນະພາມເຫຼົ່ານັ້ນ
ຍ່ອມຢຶດຖື ຍ່ອມສະລັດຖິ້ມ
ເໝືອນລິງຈັບງ່າໄມ້ແລ້ວກໍປ່ອຍ

[໔໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສັດເກີດສະມາທານຂໍ້ວັດທັງຫຼາຍເອງ
ຂ້ອງຢູ່ໃນສັນຍາ ຍ່ອມດຳເນີນໄປລຸ່ມ ໆ ດອນ ໆ
ສ່ວນຜູ້ມີຄວາມຮູ້ ຮູ້ທຳດ້ວຍເວດທັງຫຼາຍແລ້ວ
ເປັນຜູ້ມີປັນຍາກວ້າງຂວາງເປັນຄືພູຣິ (ແຜ່ນດິນ)
ຍ່ອມບໍ່ດຳເນີນໄປລຸ່ມ ໆ ດອນ ໆ

## ວ່າດ້ວຍການດຳເນີນໄປລຸ່ມ ໆ ດອນ ໆ

ຄຳວ່າ ສະມາທານ ຯລຯເອງ ໃນຄຳວ່າ ສັດເກີດສະມາທານຂໍ້ວັດທັງຫຼາຍເອງ ໄດ້ແກ່ສະມາທານດ້ວຍຕົນເອງ

ຄຳວ່າ ຂໍ້ວັດທັງຫຼາຍ ອະທິບາຍວ່າ ຖືເອົາ ສະມາທານ ຄື ຢຶດຖື ຮັບເອົາ ຖື ຢຶດໝັ້ນ ຖືໝັ້ນຂໍ້ວັດຢ່າງຊ້າງແດ່ ຂໍ້ວັດຢ່າງມ້າແດ່ ຂໍ້ວັດຢ່າງງົວແດ່ ຂໍ້ວັດຢ່າງໝາແດ່ ຂໍ້ວັດຢ່າງກາແດ່ ຂໍ້ວັດຢ່າງທ້າວວາສຸເທບແດ່ ຂໍ້ວັດຢ່າງພົນເທບແດ່ ຂໍ້ວັດຢ່າງປຸນນະພັດທະຣະແດ່ ຂໍ້ວັດຢ່າງ ມະນິພັດທະຣະແດ່ ຂໍ້ວັດຄືການບູຊາໄຟແດ່ ຂໍ້ວັດຢ່າງນາກແດ່ ຂໍ້ວັດຢ່າງຄຸດແດ່ ຂໍ້ວັດຢ່າງຍັກ ແດ່ ຂໍ້ວັດຢ່າງອະສູນແດ່ ຯລຯ ຂໍ້ວັດຄືການໄຫວ້ທິດແດ່

ຄຳວ່າ ສັດເກີດ ໄດ້ແກ່ ສັດ ນໍຣະຊົນ ຯລຯ ມະນຸດ ລວມຄວາມວ່າ ສັດເກີດສະມາ ທານຂໍ້ວັດທັງຫຼາຍເອງ

ຄຳວ່າ ຂ້ອງຢູ່ໃນສັນຍາ ຍ່ອມດຳເນີນໄປລຸ່ມ ໆ ດອນ ໆ ໄດ້ແກ່ ຈາກສາດສະດາ(ທຳ ອິດ) ໄປຫາສາດສະດາ (ຕໍ່ມາ) ຈາກທຳທີ່ສາດສະດາກ່າວສອນ (ຄັ້ງທຳອິດ) ໄປຫາທຳທີ່ສາດ ສະດາກ່າວສອນ (ຄັ້ງຕໍ່ມາ) ຈາກໝູ່ຄະນະ (ທຳອິດ) ໄປຫາໝູ່ຄະນະ (ຕໍ່ມາ) ຈາກທິດຖິ (ທຳ ອິດ) ໄປຫາທິດຖິ (ຕໍ່ມາ) ຈາກປະຕິປະທາ (ທຳອິດ) ໄປຫາປະຕິປະທາ (ຕໍ່ມາ) ຈາກມັກ (ທຳ ອິດ) ໄປຫາມັກ (ຕໍ່ມາ)

ຄຳວ່າ ຜູ້ຂ້ອງຢູ່ໃນສັນຍາ ອະທິບາຍວ່າ ຜູ້ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວ ພັນໃນການສັນຍາ ພະຍາບາດສັນຍາ ວິຫິງສາສັນຍາ ທິດຖິສັນຍາ ປຽບເໝືອນ ສິ່ງຂອງ ຂ້ອງ ຄື ຕິດ ກ່ຽວ ແຂວນ ກ່ຽວພັນ ຕິດຕຶງຢູ່ທີ່ຕະປູຂ້າງຝາ ຫຼື ທີ່ໄມ້ແຂວນ ສັນໃດ ສັດເກີດນັ້ນກໍ ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວພັນໃນການສັນຍາ ພະຍາບາດສັນຍາ ວິຫິງສາ ສັນຍາ ທິດຖິສັນຍາ ສັນນັ້ນຄືກັນ ລວມຄວາມວ່າ ຜູ້ຂ້ອງຢູ່ໃນສັນຍາ ຍ່ອມດຳເນີນໄປລຸ່ມ ໆ ດອນ ໆ

## ວ່າດ້ວຍຜູ້ຮູ້ທຳ ໗ ປະການ

ຄຳວ່າ ຜູ້ມີຄວາມຮູ້ ໃນຄຳວ່າ ສ່ວນຜູ້ມີຄວາມຮູ້ ຮູ້ທຳດ້ວຍເວດທັງຫຼາຍແລ້ວ ໄດ້ແກ່ ຜູ້ ມີຄວາມຮູ້ ຄື ມີວິດຊາ ມີຍານ ມີປັນຍາເຄື່ອງຕັດສະຮູ້ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງ ທຳລາຍກິເລດ

ຄຳວ່າ ດ້ວຍເວດທັງຫຼາຍ ໄດ້ແກ່ ຍານໃນມັກ ໔ ຕັດຮຽກວ່າ ເວດ ຄື ປັນຍາ ປັນຍິນ ຊີ ປັນຍາພະລະ ທຳມະວິຈະຍະສຳໂພດຊົງ ປັນຍາເຄື່ອງພິຈາລະນາ ປັນຍາເຄື່ອງເຫັນແຈ້ງ ສຳມາທິດຖິ

ຜູ້ມີຄວາມຮູ້ນັ້ນ ເຖິງບ່ອນສຸດ ບັນລຸບ່ອນສຸດ ເຖິງສ່ວນສຸດ ບັນລຸສ່ວນສຸດ ເຖິງປາຍສຸດ ບັນລຸປາຍສຸດ ເຖິງຄວາມສຳເລັດ ບັນລຸຄວາມສຳເລັດ ເຖິງບ່ອນປົກປ້ອງ ບັນລຸບ່ອນປົກປ້ອງ ເຖິງບ່ອນຫຼົບຫຼີກ ບັນລຸບ່ອນຫຼົບຫຼີກ ເຖິງບ່ອນເພິ່ງ ບັນລຸບ່ອນເພິ່ງ ເຖິງບ່ອນບໍ່ມີໄພ ບັນລຸ ບ່ອນບໍ່ມີໄພ ເຖິງບ່ອນບໍ່ຈຸຕິ ບັນລຸບ່ອນບໍ່ຈຸຕິ ເຖິງບ່ອນບໍ່ຕາຍ ບັນລຸບ່ອນບໍ່ຕາຍ ເຖິງບ່ອນດັບ ບັນລຸບ່ອນດັບແຫ່ງຊາດ ຊະຣາ ມໍຣະນະ ດ້ວຍເວດເຫຼົ່ານັ້ນ

ອີກໄນໜຶ່ງ ຊື່ວ່າເວທະຄູ ຍ້ອນເຖິງບ່ອນສຸດແຫ່ງຄວາມຮູ້ທັງຫຼາຍ ຊື່ວ່າເວທະຄູ ຍ້ອນເຖິງບ່ອນສຸດດ້ວຍຄວາມຮູ້ທັງຫຼາຍ ຊື່ວ່າເວທະຄູ ຍ້ອນຮູ້ແຈ້ງທຳ ໗ ປະການ ຄື

໑. ເປັນຜູ້ຮູ້ແຈ້ງ ສັກກາຍະທິດຖິ
໒. ເປັນຜູ້ຮູ້ແຈ້ງ ວິຈິກິດສາ
໓. ເປັນຜູ້ຮູ້ແຈ້ງ ສີລັບພະຕະປະຣາມາດ
໔. ເປັນຜູ້ຮູ້ແຈ້ງ ຣາຄະ
໕. ເປັນຜູ້ຮູ້ແຈ້ງ ໂທສະ
໖. ເປັນຜູ້ຮູ້ແຈ້ງ ໂມຫະ
໗. ເປັນຜູ້ຮູ້ແຈ້ງ ມານະ

ຜູ້ມີຄວາມຮູ້ນັ້ນເປັນຜູ້ຮູ້ແຈ້ງບາບອະກຸສົນທຳ ເຊິ່ງເປັນເຫດແຫ່ງຄວາມເສົ້າໝອງກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ມໍຣະນະ ຕໍ່ໄປ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ສະພິຍະ)

ບຸກຄົນໄຈ້ແຍກເວດທັງໝົດ
ຂອງພວກສະມະນະພາມທີ່ມີຢູ່
ເປັນຜູ້ປາສະຈາກຣາຄະໃນເວທະນາທັງປວງ
ກ້າວລ່ວງເວດທັງປວງແລ້ວ ຊື່ວ່າເວທະຄູ

ຄຳວ່າ ສ່ວນຜູ້ມີຄວາມຮູ້ ຮູ້ທຳດ້ວຍຄວາມຮູ້ທັງຫຼາຍແລ້ວ ອະທິບາຍວ່າ ຮູ້ ຄື ຮູ້ຍິ່ງທຳວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຯລຯ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຯລຯ ຍ້ອນນາມຮູບເປັນປັດໄຈ ສາລະຍະຕະນະຈຶ່ງມີ ຯລຯ ຍ້ອນສາລະຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຯລຯ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຯລຯ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ ຯລຯ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຯລຯ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຯລຯ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຯລຯ ຍ້ອນຊາດ ເປັນປັດໄຈ ຊະຣາ ມໍຣະນະຈຶ່ງມີ

ຮູ້ ຄື ຮູ້ຍິ່ງທຳວ່າ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ ຯລຯ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຍ້ອນວິນຍານດັບ ນາມຮູບຈຶ່ງດັບ ຯລຯ ຍ້ອນນາມຮູບດັບ ສາລະຍະຕະນະ ຈຶ່ງດັບ ຯລຯ ຍ້ອນສາລະຍະຕະນະດັບ ຜັດສະຈຶ່ງດັບ ຯລຯ ຍ້ອນຜັດສະດັບ ເວທະນາຈຶ່ງດັບ ຯລຯ ຍ້ອນເວທະນາດັບ ຕັນຫາຈຶ່ງດັບ ຯລຯ ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ ຯລຯ ຍ້ອນອຸປາທານ ດັບ ພົບຈຶ່ງດັບ ຯລຯ ຍ້ອນພົບດັບ ຊາດຈຶ່ງດັບ ຯລຯ ຍ້ອນຊາດດັບ ຊະຣາ ມໍຣະນະ ຈຶ່ງດັບ

ຮູ້ ຄື ຮູ້ຍິ່ງທຳວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ຮູ້ ຄື ຮູ້ຍິ່ງທຳວ່າ ເຫຼົ່ານີ້ອາສະວະ ຯລຯ ນີ້ອາສະວະສະມຸໄທ ຯລຯ ນີ້ອາສະວະນິໂຣທະ ຯລຯ ນີ້ອາສະວະນິໂຣທະຄາມີນີປະຕິປະທາ

ຮູ້ ຄື ຮູ້ຍິ່ງທຳວ່າ ເຫຼົ່ານີ້ທຳທີ່ຄວນຮູ້ຍິ່ງ ຯລຯ ເຫຼົ່ານີ້ທຳທີ່ຄວນກຳນົດຮູ້ ຯລຯ ເຫຼົ່ານີ້ທຳທີ່ຄວນລະ ຯລຯ ເຫຼົ່ານີ້ທຳທີ່ຄວນຈະເລີນ ຯລຯ ເຫຼົ່ານີ້ທຳທີ່ຄວນເຮັດໃຫ້ແຈ້ງ

ຮູ້ ຄື ຮູ້ຍິ່ງທຳຄືເຫດເກີດ ເຫດດັບ ຄຸນໂທດແລະການສະລັດອອກແຫ່ງຜັດສາຍະຕະນະ ໖

ຮູ້ ຄື ຮູ້ຍິ່ງທຳຄືເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດອອກແຫ່ງອຸປາທານຂັນ ໕

ຮູ້ ຄື ຮູ້ຍິ່ງທຳຄືເຫດເກີດ ເຫດດັບ ຄຸນ ໂທດແລະການສະລັດອອກແຫ່ງມະຫາພູຕະຮູບ ໔

ຮູ້ ຄື ຮູ້ຍິ່ງທຳວ່າ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ສ່ວນຜູ້ມີຄວາມຮູ້ ຮູ້ທຳດ້ວຍເວດ ທັງຫຼາຍແລ້ວ

ຄຳວ່າ ເປັນຜູ້ມີປັນຍາກວ້າງຂວາງເປັນຄືພູຣິ (ແຜ່ນດິນ) ຍ່ອມບໍ່ດຳເນີນໄປລຸ່ມ ໆ ດອນ ໆ ໄດ້ແກ່ ບໍ່ຈາກສາດສະດາ (ທຳອິດ) ໄປຫາສາດສະດາ (ຕໍ່ມາ) ບໍ່ຈາກທຳທີ່ສາດສະດາກ່າວສອນ (ທຳອິດ) ໄປຫາທຳທີ່ສາດສະດາກ່າວສອນ (ຕໍ່ມາ) ບໍ່ຈາກໝູ່ຄະນະ (ທຳອິດ) ໄປຫາໝູ່ຄະນະ (ຕໍ່ມາ) ບໍ່ຈາກທິດຖິ (ທຳອິດ) ໄປຫາທິດຖິ (ຕໍ່ມາ) ບໍ່ຈາກປະຕິປະທາ (ທຳອິດ)ໄປຫາປະຕິປະທາ (ຕໍ່ມາ) ບໍ່ຈາກມັກ (ທຳອິດ) ໄປຫາມັກ (ຕໍ່ມາ)

ຄຳວ່າ ເປັນຜູ້ມີປັນຍາກວ້າງຂວາງເປັນຄືພູຣິ (ແຜ່ນດິນ) ໄດ້ແກ່ ເປັນຜູ້ມີປັນຍາເປັນຄືພູຣິ ຄືມີປັນຍາຍິ່ງໃຫຍ່ ມີປັນຍາຫຼາຍ ມີປັນຍາອາດຫານ ມີປັນຍາວ່ອງໄວ ມີປັນຍາແຫຼມຄົມ ມີປັນຍາເຄື່ອງທຳລາຍກິເລດ ແຜ່ນດິນ ຕັດຮຽກວ່າ ພູຣິ ບຸກຄົນນັ້ນປະກອບດ້ວຍປັນຍາ ອັນກວ້າງຂວາງ ແຜ່ໄປ ສະເໝີດ້ວຍແຜ່ນດິນນັ້ນ ລວມຄວາມວ່າ ເປັນຜູ້ມີປັນຍາກວ້າງຂວາງເປັນຄືພູຣິ (ແຜ່ນດິນ) ຍ່ອມບໍ່ດຳເນີນໄປລຸ່ມ ໆ ດອນ ໆ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສັດເກີດສະມາທານຂໍ້ວັດທັງຫຼາຍເອງ
ຂ້ອງຢູ່ໃນສັນຍາ ຍ່ອມດຳເນີນໄປລຸ່ມ ໆ ດອນ ໆ
ສ່ວນຜູ້ມີຄວາມຮູ້ ຮູ້ທຳດ້ວຍເວດທັງຫຼາຍແລ້ວ
ເປັນຜູ້ມີປັນຍາກວ້າງຂວາງເປັນຄືພູຣິ (ແຜ່ນດິນ)
ຍ່ອມບໍ່ດຳເນີນໄປລຸ່ມ ໆ ດອນ ໆ

[໔໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຜູ້ມີປັນຍານັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ
ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼືອາລົມທີ່ຮັບຮູ້ແນວໃດແນວໜຶ່ງ
ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດຜູ້ມີປັນຍານັ້ນ
ຜູ້ເຫັນ ຜູ້ປະພຶດເປີດເຜີຍ ດ້ວຍເຫດອັນໃດນໍ?

## ວ່າດ້ວຍເສນາມານ

ຄຳວ່າ ຜູ້ມີປັນຍານັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ ຄືຮູບທີ່ເຫັນ ສຽງ ທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ແນວໃດແນວໜຶ່ງ ອະທິບາຍວ່າ ເສນາມານ ຕັດຮຽກວ່າ ເສນາ ກາຍທຸດຈະຣິດ ຊື່ວ່າ ເສນາມານ ວະຈີທຸດຈະຣິດ ຊື່ວ່າເສນາມານ ມະໂນທຸດຈະຣິດ ຊື່ວ່າ ເສນາມານ ຣາຄະ ຊື່ວ່າເສນາມານ ໂທສະ ຊື່ວ່າເສນາມານ ໂມຫະ ຊື່ວ່າເສນາມານ ໂກທະ ຯລຯ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າເສນາມານ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ກິເລດກາມເຮົາຮຽກວ່າເສນາກອງທີ ໑ ຂອງທ່ານ
ຄວາມບໍ່ຍິນດີເຮົາຮຽກວ່າເສນາກອງທີ ໒ ຂອງທ່ານ
ຄວາມຫິວກະຫາຍເຮົາຮຽກວ່າເສນາກອງທີ ໓ ຂອງທ່ານ
ຕັນຫາເຮົາຮຽກວ່າເສນາກອງທີ ໔ ຂອງທ່ານ
ຖີນະມິດທະເຮົາຮຽກວ່າເສນາກອງທີ ໕ ຂອງທ່ານ
ຄວາມຢ້ານເຮົາຮຽກວ່າເສນາກອງທີ ໖ ຂອງທ່ານ
ວິຈິກິດສາເຮົາຮຽກວ່າເສນາກອງທີ ໗ ຂອງທ່ານ
ມັກຂະແລະຖຳພະເຮົາຮຽກວ່າເສນາກອງທີ ໘ ຂອງທ່ານ
ລາບ ຄວາມສັນເສີນ ສັກກາຣະແລະຍົດທີ່ໄດ້ມາຜິດ ໆ
ເຮົາຮຽກວ່າເສນາກອງທີ ໙ ຂອງທ່ານ
ການຍົກຕົນແລະຂົ່ມຜູ້ອື່ນເຮົາຮຽກວ່າເສນາກອງທີ ໑໐ ຂອງທ່ານ
ມານເອີຍ ເສນາຂອງທ່ານນີ້ ມີປົກກະຕິປະຫານຜູ້ມີທຳດຳ
ຄົນຢ້ານເອົາຊະນະເສນານັ້ນບໍ່ໄດ້
ແຕ່ຄົນກ້າ ເມື່ອຊະນະໄດ້ແລ້ວຍ່ອມໄດ້ຄວາມສຸກ

ເມື່ອໃດ ເສນາມານທັງໝົດແລະກິເລດທີ່ສ້າງເສນາຝ່າຍກົງກັນຂ້າມທັງປວງ ຖືກຜູ້ມີປັນຍາພິຊິດ ແລະເຮັດໃຫ້ພ່າຍແພ້ ຖືກທຳລາຍ ກຳຈັດ ເຮັດໃຫ້ບໍ່ສູ້ໜ້າແລ້ວດ້ວຍອະຣິຍະມັກ ໔ ເມື່ອນັ້ນ ຜູ້ມີປັນຍານັ້ນຕັດຮຽກວ່າ ເປັນຜູ້ກຳຈັດເສນາ ຄື ເປັນຜູ້ກຳຈັດເສນາໃນຮູບທີ່ເຫັນ ກຳຈັດເສນາໃນສຽງທີ່ໄດ້ຍິນ ກຳຈັດເສນາໃນອາລົມທີ່ຮັບຮູ້ ແລະກຳຈັດເສນາໃນທຳມາຣົມທີ່ຮູ້ແຈ້ງແລ້ວ ລວມຄວາມວ່າ ຜູ້ມີປັນຍານັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ ຄືຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ແນວໃດແນວໜຶ່ງ

ຄຳວ່າ ຜູ້ມີປັນຍານັ້ນ ຜູ້ເຫັນ ຜູ້ປະພຶດເປີດເຜີຍ ອະທິບາຍວ່າ ຜູ້ມີປັນຍານັ້ນ ຜູ້ເຫັນທຳມົດຈົດ ເຫັນທຳສະອາດ ເຫັນທຳບໍລິສຸດ ເຫັນທຳຜ່ອງແຜ້ວ ເຫັນທຳຜ່ອງໃສ ອີກໄນໜຶ່ງ ຄວາມເຫັນມົດຈົດ ຄວາມເຫັນສະອາດ ຄວາມເຫັນບໍລິສຸດ ຄວາມເຫັນຜ່ອງແຜ້ວ ຄວາມເຫັນຜ່ອງໃສ

ຄຳວ່າ ເປີດເຜີຍ ອະທິບາຍວ່າ ເຄື່ອງປິດບັງຄືຕັນຫາ ເຄື່ອງປິດບັງຄືທິດຖິ ເຄື່ອງ ປິດບັງຄືກິເລດ ເຄື່ອງປິດບັງຄືທຸດຈະຣິດ ເຄື່ອງປິດບັງຄືອະວິດຊາ ເຄື່ອງປິດບັງເຫຼົ່ານັ້ນ ຖືກເປີດເຜີຍແລ້ວ ຄື ຮື້ອອກແລ້ວ ເພີກຂຶ້ນແລ້ວ ເພີກຖອນແລ້ວ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ

ຄຳວ່າ ຜູ້ປະພຶດ ໄດ້ແກ່ ຜູ້ປະພຶດ ຄື ທ່ຽວໄປຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ຜູ້ມີປັນຍານັ້ນ ຜູ້ເຫັນ ຜູ້ປະພຶດເປີດເຜີຍ

ຄຳວ່າ ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດ ຯລຯ ດ້ວຍເຫດອັນໃດນໍ? ອະທິບາຍວ່າ

ຄຳວ່າ ກຳນົດ ໄດ້ແກ່ ການກຳນົດ ໒ ຢ່າງ ຄື (໑) ການກຳນົດດ້ວຍອຳນາດ ຕັນຫາ (໒) ການກຳນົດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າການກຳນົດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການກຳນົດດ້ວຍອຳນາດທິດຖິ

ຜູ້ມີປັນຍານັ້ນລະການກຳນົດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ໃຜ ໆ ຈະເພິ່ງກຳນົດຜູ້ມີປັນຍານັ້ນດ້ວຍຣາຄະ ໂທສະ ໂມຫະ ມານະ ທິດຖິ ອຸດທັດຈະ ວິຈິກິດສາ ອະນຸໄສ ອັນໃດນໍ? ວ່າ ເປັນຜູ້ກຳໜັດ ເປັນຜູ້ຂັດເຄືອງ ເປັນຜູ້ຫຼົງ ເປັນຜູ້ຢຶດຕິດ ເປັນຜູ້ຢຶດໝັ້ນ ເປັນຜູ້ຟຸ້ງຊ່ານ ເປັນຜູ້ລັງເລ ຫຼື ເປັນຜູ້ຕົກຢູ່ໃນກຳລັງກິເລດ

ຜູ້ມີປັນຍານັ້ນລະອະພິສັງຂານເຫຼົ່ານັ້ນໄດ້ແລ້ວ ຍ້ອນເປັນຜູ້ລະອະພິສັງຂານໄດ້ແລ້ວ ໃຜ ໆ ຈະເພິ່ງກຳນົດຄະຕິດ້ວຍເຫດອັນໃດນໍ? ວ່າ ເປັນຜູ້ເກີດໃນນະຣົກ ເປັນຜູ້ເກີດໃນກຳເນີດເດຍຣັດສານ ເປັນຜູ້ເກີດໃນເຜດວິໄສ ເປັນມະນຸດ ເປັນເທບ ເປັນຜູ້ມີຮູບ ເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼື ວ່າເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ໃຜ ໆ ຈະເພິ່ງກຳນົດ ຄື ກຳນົດຮູ້ ເຖິງການກຳນົດຮູ້ດ້ວຍເຫດ ປັດໄຈ ແລະການໃດ ເຫດ ປັດໄຈ ແລະການນັ້ນບໍ່ມີ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດ ຯລຯ ດ້ວຍເຫດອັນໃດໄດ້ນໍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຜູ້ມີປັນຍານັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ<br>
ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ແນວໃດແນວໜຶ່ງ<br>
ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດຜູ້ມີປັນຍານັ້ນ<br>
ຜູ້ເຫັນ ຜູ້ປະພຶດເປີດເຜີຍ ດ້ວຍເຫດອັນໃດນໍ?

[໔໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສັດຕະບຸຣຸດທັງຫຼາຍຍ່ອມບໍ່ກຳນົດ ບໍ່ເຊີດຊູ
ສັດຕະບຸຣຸດເຫຼົ່ານັ້ນ ບໍ່ກ່າວວ່າ ເປັນຄວາມມົດຈົດສຸດໂຕ່ງ
ສະລັດກິເລດເຄື່ອງຮ້ອຍຮັດອັນເປັນເຫດຍຶດໝັ້ນ ທີ່ຮ້ອຍຮັດໄວ້ແລ້ວ
ບໍ່ກໍ່ຄວາມຫວັງໃນບ່ອນໃດ ໆ ໃນໂລກ

## ວ່າດ້ວຍຄຸນລັກສະນະຂອງສັດຕະບຸຣຸດ

ຄຳວ່າ ຍ່ອມບໍ່ກຳນົດ ບໍ່ເຊີດຊູ ອະທິບາຍວ່າ

ຄຳວ່າ ກຳນົດ ໄດ້ແກ່ ການກຳນົດ ໒ ຢ່າງ ຄື (໑) ການກຳນົດດ້ວຍອຳນາດ ຕັນຫາ (໒) ການກຳນົດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າການກຳນົດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການກຳນົດດ້ວຍອຳນາດທິດຖິ

ສັດຕະບຸຣຸດເຫຼົ່ານັ້ນລະການກຳນົດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ສັດຕະບຸຣຸດ ຈຶ່ງບໍ່ກຳນົດ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ເຊິ່ງການກຳນົດດ້ວຍອຳນາດຕັນຫາ ຫຼື ການກຳນົດດ້ວຍອຳນາດທິດຖິ ລວມຄວາມວ່າ ຍ່ອມບໍ່ກຳນົດ

ຄຳວ່າ ບໍ່ເຊີດຊູ ອະທິບາຍວ່າ

ຄຳວ່າ ເຊີດຊູ ໄດ້ແກ່ ການເຊີດຊູ ໒ ຢ່າງ ຄື (໑) ການເຊີດຊູດ້ວຍອຳນາດຕັນຫາ (໒) ການເຊີດຊູດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າການເຊີດຊູດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການເຊີດຊູດ້ວຍອຳນາດທິດຖິ

ສັດຕະບຸຣຸດເຫຼົ່ານັ້ນ ລະການເຊີດຊູດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການເຊີດຊູດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການເຊີດຊູດ້ວຍອຳນາດຕັນຫາ ສະລັດຖິ້ມການເຊີດຊູດ້ວຍອຳນາດທິດຖິໄດ້ແລ້ວ ສັດຕະບຸຣຸດກໍບໍ່ທ່ຽວເຊີດຊູຕັນຫາຫຼືທິດຖິໄວ້ ຄື ບໍ່ມີຕັນຫາເປັນທຸງໄຊ ບໍ່ມີຕັນຫາເປັນຍອດທຸງ ບໍ່ມີຕັນຫາເປັນໃຫຍ່ ບໍ່ມີທິດຖິເປັນທຸງໄຊ ບໍ່ມີທິດຖິເປັນຍອດທຸງ ບໍ່ມີທິດຖິເປັນໃຫຍ່ ຄືບໍ່ໄດ້ຖືກຕັນຫາຫຼືທິດຖິຄອບງຳທ່ຽວໄປຢູ່ ລວມຄວາມວ່າ ຍ່ອມບໍ່ກຳນົດ ບໍ່ເຊີດຊູ

ຄຳວ່າ ສັດຕະບຸຣຸດເຫຼົ່ານັ້ນບໍ່ກ່າວວ່າ ເປັນຄວາມມົດຈົດສຸດໂຕ່ງ ອະທິບາຍວ່າ ສັດຕະບຸຣຸດ ບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈງ ຄວາມມົດຈົດສຸດໂຕ່ງ ຄື ຄວາມມົດຈົດໂດຍການວຽນວ່າຍ ຄວາມເຫັນວ່າການກະທຳບໍ່ມີຜົນ ມິວາທະວ່າທ່ຽງ ລວມຄວາມວ່າ ສັດຕະບຸຣຸດເຫຼົ່ານັ້ນບໍ່ກ່າວວ່າ ເປັນຄວາມມົດຈົດສຸດໂຕ່ງ

ຄຳວ່າ ສະລັດກິເລດເຄື່ອງຮ້ອຍຮັດອັນເປັນເຫດຢຶດໝັ້ນທີ່ຮ້ອຍຮັດໄວ້ແລ້ວ ອະທິບາຍວ່າ ຄຳວ່າ ກິເລດເຄື່ອງຮ້ອຍຮັດ ໄດ້ແກ່ ກິເລດເຄື່ອງຮ້ອຍຮັດ ໔ ຢ່າງ ຄື

໑. ກິເລດເຄື່ອງຮ້ອຍຮັດກາຍຄືອະພິດຊາ
໒. ກິເລດເຄື່ອງຮ້ອຍຮັດກາຍຄືພະຍາບາດ
໓. ກິເລດເຄື່ອງຮ້ອຍຮັດກາຍຄືສີລັບພະຕະປະຣາມາດ
໔. ກິເລດເຄື່ອງຮ້ອຍຮັດກາຍຄືຄວາມຖືໝັ້ນວ່ານີ້ເທົ່ານັ້ນຈິງ

ຄວາມກຳໜັດໃນທິດຖິຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍຄືອະພິດຊາ

ຄວາມອາຄາດ ຄວາມບໍ່ພໍໃຈໃນວາທະຂອງຜູ້ອື່ນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍຄືພະຍາບາດ

ຄວາມຢຶດໝັ້ນສີນ ຂໍ້ວັດຫຼືສີນແລະຂໍ້ວັດຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍຄື ສີລັບພະຕະປະຣາມາດ

ທິດຖິຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍ ຄື ອິທັງສັດຈາພິນິເວດ

ຍ້ອນເຫດໃດ ຈຶ່ງຮຽກວ່າ ກິເລດເຄື່ອງຮ້ອຍຮັດອັນເປັນເຫດຢຶດໝັ້ນ ຍ້ອນສັດ ທັງຫຼາຍ ຍ່ອມຢຶດຖື ເຂົ້າໄປຢຶດຖື ຖື ຢຶດໝັ້ນ ຖືໝັ້ນຮູບ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຄະຕິ ฯລฯ ການຖືກຳເນີດ ฯລฯ ປະຕິສົນທິ ฯລฯ ພົບ ຍ້ອນສັດທັງຫຼາຍ ຍ່ອມຢຶດຖື ເຂົ້າໄປຢຶດຖື ຖື ຢຶດໝັ້ນ ຖືໝັ້ນ ສັງສາຣະວັດ ດ້ວຍກິເລດເຄື່ອງຮ້ອຍຮັດເຫຼົ່ານັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກວ່າ ກິເລດເຄື່ອງຮ້ອຍຮັດອັນເປັນເຫດຢຶດໝັ້ນ

ຄຳວ່າ ສະລັດ ໄດ້ແກ່ ສະລະ ຫຼື ສະລັດກິເລດເຄື່ອງຮ້ອຍຮັດ ອີກໄນໜຶ່ງ ສັດຕະບຸຣຸດ ແກ້ ຫຼື ສະລັດກິເລດເຄື່ອງຮ້ອຍຮັດ ຄື ກິເລດເຄື່ອງຜູກພັນ ທີ່ຮ້ອຍຮັດ ຮັດຄຶງ ຂ້ອງ ຕິດ ກ່ຽວ ກ່ຽວພັນ ເກາະຕິດ ຕິດແໜ້ນແລ້ວ ອະທິບາຍວ່າ ສັດຕະບຸຣຸດ ສະລະ ຫຼື ສະລັດກິເລດ ເຄື່ອງຮ້ອຍຮັດ ເໝືອນຄົນທຳການປົດປ່ອຍວໍ ລົດ ກວຽນ ຫຼື ລົດມີເຄື່ອງປະດັບ ໃຫ້ເຄື່ອນທີ່ໄປໄດ້ສະນັ້ນ

ອີກໄນໜຶ່ງ ສັດຕະບຸຣຸດ ແກ້ ຫຼື ສະລັດກິເລດເຄື່ອງຮ້ອຍຮັດ ຄືກິເລດເຄື່ອງຜູກພັນທີ່ຮ້ອຍຮັດ ຮັດຄຶງ ຂ້ອງ ຕິດ ກ່ຽວ ກ່ຽວພັນ ເກາະຕິດ ຕິດແໜ້ນແລ້ວ ລວມຄວາມວ່າ ສະລັດກິເລດເຄື່ອງຮ້ອຍຮັດອັນເປັນເຫດຢຶດໝັ້ນ ທີ່ຮ້ອຍຮັດໄວ້ແລ້ວ

ຄຳວ່າ ບໍ່ກໍ່ຄວາມຫວັງໃນບ່ອນໃດ ໆ ໃນໂລກ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຫວັງ ຄື ຄວາມກຳໜັດ ກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ບໍ່ກໍ່ຄວາມຫວັງ ໄດ້ແກ່ ບໍ່ກໍ່ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນເຊິ່ງຄວາມຫວັງ

ຄຳວ່າ ໃນບ່ອນໃດ ໆ ໄດ້ແກ່ ໃນບ່ອນໃດ ຄື ບ່ອນໃດ ໆ ບ່ອນແນວໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ ລວມຄວາມວ່າ ບໍ່ກໍ່ ຄວາມຫວັງໃນບ່ອນໃດ ໆ ໃນໂລກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສັດຕະບຸຣຸດທັງຫຼາຍຍ່ອມບໍ່ກຳນົດ ບໍ່ເຊີດຊູ
ສັດຕະບຸຣຸດເຫຼົ່ານັ້ນ ບໍ່ກ່າວວ່າ ເປັນຄວາມບໍລິສຸດໂດຍ
ສະລັດກິເລດເຄື່ອງຮ້ອຍຮັດອັນເປັນເຫດຢຶດໝັ້ນ ທີ່ຮ້ອຍຮັດໄວ້ແລ້ວ
ບໍ່ກໍ່ຄວາມຫວັງໃນບ່ອນໃດ ໆ ໃນໂລກ

[໓໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພຣະອະຣະຫັນເປັນຜູ້ໄປພົ້ນເຂດແດນແລ້ວ ເປັນພາມ
ຍ້ອນຮູ້ແລະເຫັນ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນ
ພຣະອະຣະຫັນບໍ່ມີຄວາມກຳໜັດໃນກາມມະຄຸນເປັນທີ່ກຳໜັດ
ບໍ່ກຳໜັດໃນສະມາບັດເປັນທີ່ຄາຍກຳໜັດ
ພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນວ່າ ປະເສີດໃນໂລກນີ້
ວ່າດ້ວຍພຣະອະຣະຫັນ

ຄຳວ່າ ພຣະອະຣະຫັນເປັນຜູ້ໄປພົ້ນເຂດແດນແລ້ວ ເປັນພາມ ຍ້ອນຮູ້ແລະ ເຫັນ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນ ອະທິບາຍວ່າ

ຄຳວ່າ ເຂດແດນ ໄດ້ແກ່ ເຂດແດນ ໔ ຢ່າງ ຄື

໑. ສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ທິດຖານຸໄສ ວິຈິກິດສານຸໄສ ແລະ ເຫຼົ່າກິເລດທີ່ຢູ່ໃນພວກດຽວກັນນັ້ນ ນີ້ເປັນເຂດແດນທີ ໑
໒. ກາມຣາຄະສັງໂຍດ ປະຕິຄະສັງໂຍດຢ່າງຫຍາບ ກາມຣາຄານຸໄສ ປະຕິຄານຸໄສ ຢ່າງຫຍາບ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັນນັ້ນ ນີ້ເປັນເຂດແດນທີ ໒
໓. ກາມຣາຄະສັງໂຍດ ປະຕິຄະສັງໂຍດຢ່າງລະອຽດ ກາມຣາຄານຸໄສ ປະຕິຄານຸໄສ ຢ່າງລະອຽດ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັນນັ້ນ ນີ້ເປັນເຂດແດນທີ ໓
໔. ຣູບຣາຄະ ອະຣູບຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັນນັ້ນ ນີ້ເປັນເຂດແດນ ທີ ໔

ຍ້ອນພຣະອະຣະຫັນ ເປັນຜູ້ກ້າວລ່ວງ ຄື ກ້າວພົ້ນ ລ່ວງພົ້ນ ເຂດແດນທັງ ໔ ເຫຼົ່ານີ້ ດ້ວຍອະຣິຍະມັກ ໔ ພຣະອະຣະຫັນນັ້ນ ຈຶ່ງຕັດຮຽກວ່າ ຜູ້ໄປພົ້ນເຂດແດນແລ້ວ

ຄຳວ່າ ເປັນພາມ ອະທິບາຍວ່າ ທີ່ຊື່ວ່າພາມ ຍ້ອນລອຍທຳ ໆ ປະການໄດ້ແລ້ວ ຄື

໑. ລອຍສັກກາຍະທິດຖິໄດ້ແລ້ວ
໔. ລອຍວິຈິກິດສາໄດ້ແລ້ວ
໓. ລອຍສີລັບພະຕະປະຣາມາດໄດ້ແລ້ວ ຯລຯ ບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ ບັນດິດຮຽກຜູ້ນັ້ນວ່າເປັນພາມ

ຄຳວ່າ ນັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ຍ້ອນຮູ້ ໄດ້ແກ່ ຍ້ອນຮູ້ດ້ວຍປະຣະຈິດຕະຍານ (ຍານເປັນເຄື່ອງຮູ້ຈິດຂອງຜູ້ອື່ນ) ຫຼື ຮູ້ດ້ວຍປຸບເພນິວາສານຸດສະຕິຍານ (ຍານເປັນເຄື່ອງຣະລຶກເຖິງຂັນທີ່ເຄີຍອາໄສຢູ່ກ່ອນ)

ຄຳວ່າ ຍ້ອນເຫັນ ໄດ້ແກ່ ຍ້ອນເຫັນດ້ວຍມັງສະຈັກຂຸ ຫຼື ເຫັນດ້ວຍທິບພະຈັກຂຸ

ຄຳວ່າ ພຣະອະຣະຫັນເປັນຜູ້ໄປພົ້ນເຂດແດນແລ້ວ ເປັນພາມ ຍ້ອນຮູ້ແລະ ເຫັນພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນ ອະທິບາຍວ່າ ພຣະອະຣະຫັນນັ້ນ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ເຊິ່ງຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອວ່າ ສິ່ງນີ້ຢຽມ ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ຄື ຄວາມຖືໝັ້ນນັ້ນພຣະອະຣະຫັນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ພຣະອະຣະຫັນ ເປັນຜູ້ໄປພົ້ນເຂດແດນແລ້ວ ເປັນພາມ ຍ້ອນຮູ້ແລະເຫັນ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນ

ຄຳວ່າ ບໍ່ເປັນຜູ້ກຳໜັດໃນກາມມະຄຸນເປັນທີ່ກຳໜັດ ບໍ່ກຳໜັດໃນສະມາບັດເປັນທີ່ຄາຍກຳໜັດ ອະທິບາຍວ່າ ຊົນເຫຼົ່າໃດກຳໜັດ ຄື ຍິນດີ ຕິດໃຈ ສະຍົບ ມົກມຸ້ນ ເກາະຕິດ ກ່ຽວພັນພົວພັນໃນກາມມະຄຸນ ໕ ຊົນເຫຼົ່ານັ້ນ ຕັດຮຽກວ່າ ຜູ້ກຳໜັດໃນ ກາມມະຄຸນເປັນທີ່ກຳໜັດ ຊົນເຫຼົ່າໃດກຳໜັດ ຄື ຍິນດີ ຕິດໃຈ ສະຍົບ ມົກມຸ້ນ ເກາະຕິດ ກ່ຽວພັນ ພົວພັນໃນຣູບປາວະຈອນສະມາບັດ ແລະອະຣູບປາວະຈອນສະມາບັດ ຊົນເຫຼົ່ານັ້ນຕັດຮຽກວ່າ ຜູ້ກຳໜັດໃນສະມາບັດເປັນທີ່ຄາຍກຳໜັດ

ຄຳວ່າ ບໍ່ເປັນຜູ້ກຳໜັດໃນກາມມະຄຸນເປັນທີ່ກຳໜັດ ບໍ່ກຳໜັດໃນສະມາບັດເປັນທີ່ຄາຍກຳໜັດ ອະທິບາຍວ່າ ເມື່ອໃດ ພຣະອະຣະຫັນລະກາມຣາຄະ ຣູບຣາຄະ ແລະອະຣູບຣາຄະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ເມື່ອນັ້ນ ພຣະອະຣະຫັນ ຈຶ່ງຊື່ວ່າເປັນຜູ້ບໍ່ ກຳໜັດໃນກາມມະຄຸນເປັນທີ່ກຳໜັດ ບໍ່ກຳໜັດໃນສະມາບັດເປັນທີ່ຄາຍກຳໜັດ

ຄຳວ່າ ນັ້ນ ໃນຄຳວ່າ ພຣະອະຣະຫັນນັ້ນ ບໍ່ມີຄວາມຖືໝັ້ນວ່າປະເສີດໃນໂລກນີ້ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ ພຣະອະຣະຫັນນັ້ນບໍ່ມີຄວາມຖື ຄວາມຍຶດໝັ້ນ ຄວາມ ຖືໝັ້ນ ຄວາມ ຕິດໃຈ ຄວາມນ້ອມໃຈເຊື່ອວ່າ ສິ່ງນີ້ ຍັ່ງມ ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ

ຄຳວ່າ ບໍ່ມີ ໄດ້ແກ່ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ໄດ້ແກ່ ຄວາມຖືໝັ້ນນັ້ນພຣະອະຣະຫັນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນ ວ່າປະເສີດໃນໂລກນີ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພຣະອະຣະຫັນເປັນຜູ້ໄປພົ້ນເຂດແດນແລ້ວ ເປັນພາມ
ຍ້ອນຮູ້ແລະເຫັນ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນ
ພຣະອະຣະຫັນບໍ່ມີຄວາມກຳໜັດໃນກາມມະຄຸນເປັນທີ່ກຳໜັດ
ບໍ່ກຳໜັດໃນສະມາບັດເປັນທີ່ຄາຍກຳໜັດ
ພຣະອະຣະຫັນນັ້ນ ຈຶ່ງບໍ່ມີຄວາມຖືໝັ້ນວ່າ ປະເສີດໃນໂລກນີ້

**ສຸດທັດຖະກະສຸດຕະນິດເທດທີ ໔ ຈົບ**

# ໕. ປະຣະມັດຖະກະສຸດຕະນິດເທດ

## ອະທິບາຍປະຣະມັດຖະກະສູດ
## ວ່າດ້ວຍຜູ້ຍຶດຖືຢູ່ໃນທິດຖິ

ພຣະສາຣີບຸດເຖຣະຈະກ່າວອະທິບາຍປະຣະມັດຖະກະສູດ ດັ່ງຕໍ່ໄປນີ້

[໖໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສັດເກີດຜູ້ຍຶດຖືໃນທິດຖິທັງຫຼາຍວ່າ ປະເສີດ
ຍ່ອມເຮັດທິດຖິໃດໃຫ້ຍິ່ງໃຫຍ່ໃນໂລກ
ກ່າວທິດຖິອື່ນທຸກຢ່າງ ນອກຈາກທິດຖິນັ້ນວ່າ ຊົ່ວ
ຍ້ອນເຫດນັ້ນ ສັດເກີດນັ້ນຈຶ່ງບໍ່ລ່ວງພົ້ນການວິວາດໄປໄດ້

ຄຳວ່າ ຍຶດຖືໃນທິດຖິທັງຫຼາຍວ່າ ປະເສີດ ອະທິບາຍວ່າ ມີສະມະນະພາມ ພວກໜຶ່ງເປັນເຈົ້າລັດທິ ສະມະນະພາມເຫຼົ່ານັ້ນ ຈັບ ຍຶດ ຖື ຍຶດໝັ້ນ ຖືໝັ້ນທິດຖິ ແນວໃດແນວໜຶ່ງໃນ

ທິດຖິ ໖໘ ວ່າ ທິດຖິນີ້ ຍັງມ ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ຍ່ອມຢູ່ ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງດ້ວຍທິດຖິຂອງຕົນ ໆ ອະທິບາຍ ວ່າ ພວກຄົນຄອງເຮືອນກໍຢູ່ໃນເຮືອນ ບັນພະຊິດທີ່ມີອາບັດກໍຢູ່ໃນອາບັດ ຜູ້ມີກິເລດກໍຢູ່ໃນກິເລດທັງຫຼາຍ ສັນໃດ ມີສະມະນະພາມພວກໜຶ່ງເປັນເຈົ້າລັດທິ ສະມະນະພາມເຫຼົ່ານັ້ນ ຈັບ ຢຶດ ຖື ຢຶດໝັ້ນ ຖືໝັ້ນທິດຖິແນວໃດແນວໜຶ່ງໃນທິດຖິ ໖໘ ວ່າ ທິດຖິນີ້ຍັງມ ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ຍ່ອມຢູ່ ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງດ້ວຍທິດຖິຂອງຕົນ ໆ ສັນນັ້ນຄືກັນ ລວມຄວາມວ່າ ຜູ້ຢຶດຖືໃນທິດຖິທັງຫຼາຍວ່າ ປະເສີດ

ຄຳວ່າ ທິດຖິໃດ ໃນຄຳວ່າ ສັດເກີດ ຯລຯຍ່ອມເຮັດທິດຖິໃດໃຫ້ຍິ່ງໃຫຍ່ໃນໂລກ ໄດ້ແກ່ລັດທິໃດ?

ຄຳວ່າ ຍ່ອມເຮັດໃຫ້ຍິ່ງໃຫຍ່ ໄດ້ແກ່ ຍ່ອມເຮັດໃຫ້ຍິ່ງໃຫຍ່ ຄື ຍ່ອມເຮັດໃຫ້ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ອະທິບາຍວ່າ ຍ່ອມເຮັດໃຫ້ຍິ່ງໃຫຍ່ ຄື ເຮັດໃຫ້ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ຄືໃຫ້ບັງເກີດ ໃຫ້ບັງເກີດຂຶ້ນວ່າ ສາດສະດານີ້ເປັນສັບພັນຍູ ທຳນີ້ສາດສະດາກ່າວສອນໄວ້ດີແລ້ວ ໝູ່ຄະນະນີ້ປະຕິບັດດີແລ້ວ ທິດຖິນີ້ເປັນສິ່ງທີ່ຈະເລີນ ປະຕິປະທານີ້ສາດສະດາບັນຍັດໄວ້ດີແລ້ວ ມັກນີ້ເປັນທາງນຳອອກ ຈາກທຸກ

ຄຳວ່າ ສັດເກີດ ໄດ້ແກ່ ສັດ ນໍຣະຊົນ ຯລຯ ມະນຸດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ ລວມຄວາມວ່າ ສັດເກີດ ຯລຯ ຍ່ອມເຮັດທິດຖິໃດໃຫ້ຍິ່ງໃຫຍ່ໃນໂລກ

ຄຳວ່າ ກ່າວທິດຖິອື່ນທຸກຢ່າງນອກຈາກທິດຖິນັ້ນວ່າ ຊົ່ວ ອະທິບາຍວ່າ ສັດເກີດນັ້ນຍ່ອມຖິ້ມ ລະຖິ້ມ ປະຖິ້ມລັດທິອື່ນທຸກຢ່າງ ນອກຈາກສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກ ຂອງຕົນ ກ່າວຄື ເວົ້າ ບອກ ສະແດງ ຊີ້ແຈ່ງແນວນີ້ວ່າ ສາດສະດານັ້ນ ບໍ່ແມ່ນສັບພັນຍູ ທຳບໍ່ແມ່ນສາດສະດາກ່າວສອນໄວ້ດີແລ້ວ ໝູ່ຄະນະບໍ່ແມ່ນຜູ້ປະຕິບັດດີແລ້ວ ທິດຖິບໍ່ແມ່ນສິ່ງທີ່ຈະເລີນ ປະຕິປະທາບໍ່ແມ່ນສາດສະດາບັນຍັດໄວ້ດີແລ້ວ ມັກບໍ່ແມ່ນທາງນຳອອກຈາກທຸກ ໃນລັດທິນັ້ນບໍ່ມີຄວາມມົດຈົດ ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຫຼືຄວາມຫຼຸດພົ້ນໄປ ຄື ໃນລັດທິນັ້ນ ສັດທັງຫຼາຍຍ່ອມມົດຈົດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼືຫຼຸດພົ້ນໄປບໍ່ໄດ້ ສັດທັງຫຼາຍ ເປັນຜູ້ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ກ່າວທິດຖິອື່ນ ທຸກຢ່າງນອກຈາກ ທິດຖິນັ້ນວ່າຊົ່ວ

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ສັດເກີດນັ້ນຈຶ່ງບໍ່ລ່ວງພົ້ນການ ວິວາທະໄປໄດ້ ໄດ້ແກ່ ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ

ຄຳວ່າ ການວິວາດ ໄດ້ແກ່ ການຜິດຖຽງຍ້ອນທິດຖິ ການໝາງໃຈກັນຍ້ອນທິດຖິ ການຍາດແຍ່ງຍ້ອນທິດຖິ ການວິວາດຍ້ອນທິດຖິ ການມຸ້ງຮ້າຍກັນຍ້ອນທິດຖິ

ຄຳວ່າ ບໍ່ລ່ວງພົ້ນໄປໄດ້ ໄດ້ແກ່ ບໍ່ກ້າວລ່ວງ ບໍ່ກ້າວພົ້ນ ບໍ່ລ່ວງພົ້ນ ລວມຄວາມວ່າ ຍ້ອນເຫດນັ້ນ ຈຶ່ງບໍ່ລ່ວງພົ້ນການວິວາດໄປໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສັດເກີດຜູ້ຢຶດຖືໃນທິດຖິທັງຫຼາຍວ່າ ປະເສີດ
ຍ່ອມເຮັດທິດຖິໃດໃຫ້ຍິ່ງໃຫຍ່ໃນໂລກ
ກ່າວທິດຖິອື່ນທຸກຢ່າງ ນອກຈາກທິດຖິນັ້ນວ່າ ຊົ່ວ
ຍ້ອນເຫດນັ້ນ ສັດເກີດນັ້ນ ຈຶ່ງບໍ່ລ່ວງພົ້ນການວິວາດໄປໄດ້

[໓໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຈົ້າລັດທິເຫັນອານິສົງໃດໃນຕົນ ໃນຮູບທີ່ເຫັນ
ໃນສຽງທີ່ໄດ້ຍິນ ໃນສີນແລະຂໍ້ວັດ ຫຼືໃນອາລົມທີ່ຮັບຮູ້
ເຈົ້າລັດທິນັ້ນຍຶດໝັ້ນທິດຖິນັ້ນໃນລັດທິຂອງຕົນນັ້ນ
ເຫັນທິດຖິອື່ນທັງປວງໂດຍຄວາມເປັນຂອງຊົ່ວ
ວ່າດ້ວຍອານິສົງໃນທິດຖິ

ຄຳວ່າ (ອານິສົງ) ໃດໃນຕົນ ໃນຄຳວ່າ ເຫັນອານິສົງໃດໃນຕົນ ໃນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ໃນສີນຂໍ້ວັດ ຫຼືໃນອາລົມທີ່ຮັບຮູ້ ໄດ້ແກ່ ອານິສົງໃດໃນຕົນ ທິດຖິ ຕັດຮຽກວ່າ ຕົນ ເຈົ້າລັດທິນັ້ນເຫັນອານິສົງ ໒ ຢ່າງ ແຫ່ງທິດຖິຂອງຕົນ ຄື (໑) ອານິສົງທີ່ມີໃນຊາດນີ້ (໒) ອານິສົງທີ່ມີໃນຊາດໜ້າ

ອານິສົງແຫ່ງທິດຖິທີ່ມີໃນຊາດນີ້ ເປັນແນວໃດ?

ຄື ສາດສະດາມີທິດຖິແນວໃດ ສາວົກກໍມີທິດຖິແນວນັ້ນ ຄື ສາວົກຍ່ອມສັກກາຣະ ເຄົາລົບ ນັບຖື ບູຊາ ທຳຄວາມຢຳເກງສາດສະດາຜູ້ມີທິດຖິແນວນັ້ນ ແລະໄດ້ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານເຊິ່ງມີສາດສະດານັ້ນເປັນຕົ້ນເຫດ ນີ້ຊື່ວ່າອານິສົງແຫ່ງທິດຖິທີ່ມີໃນຊາດນີ້

ອານິສົງແຫ່ງທິດຖິທີ່ມີ ທີ່ມີໃນຊາດໜ້າ ເປັນແນວໃດ?

ຄື ບຸກຄົນຍ່ອມຫວັງຜົນຕໍ່ໄປວ່າ ທິດຖິນີ້ ຄວນເພື່ອຄວາມເປັນນາກ ເປັນຄຸດ ເປັນຍັກ ເປັນອະສູນ ເປັນຄົນທັບ ເປັນທ້າວມະຫາຣາດ ເປັນພຣະອິນ ເປັນພຣະພົມ ຫຼືເປັນເທວະດາ ທິດຖິນີ້ ຄວນເພື່ອຄວາມມົດຈິດ ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ສັດທັງຫຼາຍຍ່ອມມົດຈິດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼຸດພົ້ນໄປດ້ວຍທິດຖິນີ້ ເຮົາຈັກມົດຈິດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼຸດພົ້ນໄປດ້ວຍທິດຖິນີ້ ນີ້ຊື່ວ່າອານິສົງແຫ່ງທິດຖິທີ່ມີໃນຊາດໜ້າ

ເຈົ້າລັດທິເຫັນອານິສົງ ໔ ຢ່າງແຫ່ງທິດຖິຂອງຕົນ ຄື ເຫັນອານິສົງ ໔ ຢ່າງ ຍ້ອນຄວາມມົດຈົດແຫ່ງຮູບທີ່ເຫັນ ເຫັນອານິສົງ ໔ ຢ່າງ ຍ້ອນຄວາມມົດຈົດແຫ່ງສຽງທີ່ໄດ້ຍິນ ເຫັນອານິສົງ ໔ ຢ່າງ ຍ້ອນຄວາມມົດຈົດແຫ່ງສິນ ເຫັນອານິສົງ ໔ ຢ່າງ ຍ້ອນຄວາມມົດຈົດແຫ່ງຂໍ້ວັດ ເຫັນອານິສົງ ໔ ຢ່າງ ຍ້ອນຄວາມມົດຈົດແຫ່ງອາລົມທີ່ຮັບຮູ້ ຄື (໑) ອານິສົງທີ່ມີໃນຊາດນີ້ (໔) ອານິສົງທີ່ມີໃນຊາດໜ້າ

ອານິສົງຍ້ອນຄວາມມົດຈົດແຫ່ງອາລົມທີ່ຮັບຮູ້ໃນຊາດນີ້ ເປັນແນວໃດ?

ຄື ສາດສະດາມີທິດຖິແນວໃດ ສາວົກກໍມີທິດຖິແນວນັ້ນ ฯລฯ ນີ້ຊື່ວ່າອານິສົງຍ້ອນຄວາມມົດຈົດແຫ່ງອາລົມທີ່ຮັບຮູ້ ໃນຊາດນີ້

ອານິສົງຍ້ອນຄວາມມົດຈົດແຫ່ງອາລົມທີ່ຮັບຮູ້ໃນຊາດໜ້າ ເປັນແນວໃດ?

ຄື ທິດຖິນີ້ຄວນເພື່ອຄວາມເປັນນາກ ฯລฯ ນີ້ຊື່ວ່າອານິສົງຍ້ອນຄວາມມົດຈົດແຫ່ງອາລົມທີ່ຮັບຮູ້ ໃນຊາດໜ້າ

ເຈົ້າລັດທິເຫັນ ຄື ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງອານິສົງຍ້ອນຄວາມມົດຈົດດ້ວຍອາລົມທີ່ຮູ້ແລ້ວ ໔ ຢ່າງ ເຫຼົ່ານີ້ ລວມຄວາມວ່າ ເບິ່ງເຫັນອານິສົງໃດ ໃນຕົນ ໃນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ໃນສິນຂໍ້ວັດ ຫຼື ໃນອາລົມທີ່ຮັບຮູ້

ຄຳວ່າ ນັ້ນ ໃນຄຳວ່າ ເຈົ້າລັດທິນັ້ນຍຶດໝັ້ນທິດຖິຂອງຕົນນັ້ນ ໄດ້ແກ່ ທິດຖິນັ້ນ

ຄຳວ່າ ໃນລັດທິຂອງຕົນນັ້ນ ໄດ້ແກ່ ໃນທິດຖິຂອງຕົນ ຄື ໃນຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ

ຄຳວ່າ ຍຶດໝັ້ນ ໄດ້ແກ່ ຈັບ ຍຶດ ຖື ຍຶດໝັ້ນ ຖືໝັ້ນວ່າ ທິດຖິນີ້ ຍ້ຽມ ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ລວມຄວາມວ່າ ເຈົ້າລັດທິນັ້ນຍຶດໝັ້ນທິດຖິນັ້ນໃນລັດທິຂອງຕົນນັ້ນ

ຄຳວ່າ ເຫັນທິດຖິອື່ນທັງປວງ ໂດຍຄວາມເປັນຂອງຊົ່ວ ອະທິບາຍວ່າ ເຫັນ ຄື ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງ ສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກ ອື່ນ ໂດຍຄວາມເປັນຂອງຊົ່ວ ຄື ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ເຫັນທິດຖິອື່ນທັງປວງໂດຍຄວາມເປັນຂອງຊົ່ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຈົ້າລັດທິເຫັນອານິສົງໃດໃນຕົນ ໃນຮູບທີ່ເຫັນ
ໃນສຽງທີ່ໄດ້ຍິນ ໃນສິນແລະຂໍ້ວັດ ຫຼືໃນອາລົມທີ່ຮັບຮູ້
ເຈົ້າລັດທິນັ້ນຍຶດໝັ້ນທິດຖິນັ້ນໃນລັດທິຂອງຕົນນັ້ນ
ເຫັນທິດຖິອື່ນທັງປວງໂດຍຄວາມເປັນຂອງຊົ່ວ

[໖໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

บุກຄົນອາໄສສາດສະດາໃດ ເຫັນສາດສະດາອື່ນວ່າຊົ່ວ
ຜູ້ສະຫຼາດທັງຫຼາຍຮຽກສາດສະດານັ້ນວ່າ ເປັນເຄື່ອງຮ້ອຍຮັດ
ຍ້ອນເຫດນັ້ນແລ ພິກຂຸຈຶ່ງບໍ່ຄວນອາໄສຮູບທີ່ເຫັນ
ສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ຫຼືສີນແລະຂໍ້ວັດ
ວ່າດ້ວຍຄວາມເຫັນຂອງຜູ້ສະຫຼາດ

ຄຳວ່າ ຜູ້ສະຫຼາດທັງຫຼາຍ ໃນຄຳວ່າ ຜູ້ສະຫຼາດທັງຫຼາຍຮຽກສາດສະດານັ້ນວ່າ ເປັນເຄື່ອງຮ້ອຍຮັດ ອະທິບາຍວ່າ ຜູ້ສະຫຼາດໃນຂັນ ຜູ້ສະຫຼາດໃນທາດ ຜູ້ສະຫຼາດໃນອາຍະຕະນະ ຜູ້ສະຫຼາດໃນປະຕິດຈະສະມຸບບາດ ຜູ້ສະຫຼາດໃນສະຕິປັດຖານ ຜູ້ສະຫຼາດໃນສຳມັບປະທານ ຜູ້ສະຫຼາດໃນອິດທິບາດ ຜູ້ສະຫຼາດໃນອິນຊີ ຜູ້ສະຫຼາດໃນພະລະ ຜູ້ສະຫຼາດໃນໂພດຊົງ ຜູ້ສະຫຼາດໃນມັກ ຜູ້ສະຫຼາດໃນຜົນ ຜູ້ສະຫຼາດໃນນິບພານ ຜູ້ສະຫຼາດເຫຼົ່ານັ້ນຮຽກແນວນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ແນວນີ້ວ່າ ນີ້ເປັນເຄື່ອງຮ້ອຍຮັດ ນີ້ເປັນເຄື່ອງຂ້ອງ ນີ້ເປັນເຄື່ອງຜູກພັນ ນີ້ເປັນເຄື່ອງກັງວົນ ລວມຄວາມວ່າ ຜູ້ສະຫຼາດທັງຫຼາຍຮຽກສາດສະດານັ້ນວ່າ ເປັນເຄື່ອງຮ້ອຍຮັດ

ຄຳວ່າ ບຸກຄົນອາໄສສາດສະດາໃດ ໃນຄຳວ່າ ບຸກຄົນອາໄສສາດສະດາໃດເຫັນສາດສະດາອື່ນວ່າຊົ່ວ ອະທິບາຍວ່າ ອາໄສ ຄື ອີງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກໃດ

ຄຳວ່າ ເຫັນສາດສະດາອື່ນວ່າຊົ່ວ ອະທິບາຍວ່າ ເຫັນ ຄື ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກອື່ນ ໂດຍ ຄວາມເປັນຂອງຊົ່ວ ຄື ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ບຸກຄົນອາໄສສາດສະດາໃດເຫັນສາດສະດາອື່ນວ່າຊົ່ວ

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນແລ ພິກຂຸຈຶ່ງບໍ່ຄວນອາໄສຮູບທີ່ ເຫັນສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ຫຼື ສີນຂໍ້ວັດ ອະທິບາຍວ່າ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ພິກຂຸຈຶ່ງບໍ່ເພິ່ງອາໄສ ຄື ບໍ່ເພິ່ງຖື ບໍ່ເພິ່ງຍຶດໝັ້ນ ບໍ່ເພິ່ງຖືໝັ້ນຮູບທີ່ເຫັນ ຫຼື ຄວາມມົດຈົດແຫ່ງຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ຄວາມມົດຈົດແຫ່ງສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ຫຼື ຄວາມມົດຈົດແຫ່ງອາລົມທີ່ຮັບຮູ້ ສີນ ຫຼື ຄວາມມົດຈົດແຫ່ງສີນ ຂໍ້ວັດຫຼືຄວາມມົດຈົດແຫ່ງຂໍ້ວັດ ລວມຄວາມວ່າ ຍ້ອນເຫດນັ້ນແລ ພິກຂຸຈຶ່ງບໍ່ຄວນອາໄສຮູບທີ່ເຫັນສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ຫຼື ສີນຂໍ້ວັດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນອາໄສສາດສະດາໃດ ເຫັນສາດສະດາອື່ນວ່າຊົ່ວ
ຜູ້ສະຫຼາດທັງຫຼາຍຮຽກສາດສະດານັ້ນວ່າ ເປັນເຄື່ອງຮ້ອຍຮັດ
ຍ້ອນເຫດນັ້ນແລ ພິກຂຸຈຶ່ງບໍ່ຄວນອາໄສຮູບທີ່ເຫັນ
ສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ຫຼື ສີນແລະຂໍ້ວັດ

[໓໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງກຳນົດທິດຖິໃນໂລກດ້ວຍຍານ ຫຼື
ແມ່ນດ້ວຍສີນແລະຂໍ້ວັດ
ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າສະເໝີເຂົາ
ບໍ່ເພິ່ງສຳຄັນຕົນວ່າ ດ້ອຍກວ່າເຂົາ ຫຼື ແມ່ນເລີດກວ່າເຂົາ

## ວ່າດ້ວຍພິກຂຸບໍ່ເພິ່ງມີທິດຖິມານະ

ຄຳວ່າ ບໍ່ເພິ່ງກຳນົດທິດຖິໃນໂລກດ້ວຍຍານ ຫຼື ແມ່ນດ້ວຍສີນແລະຂໍ້ວັດ ອະທິບາຍວ່າ ບໍ່ເພິ່ງກຳນົດ ຄື ບໍ່ເພິ່ງໃຫ້ເກີດ ບໍ່ເພິ່ງໃຫ້ເກີດຂຶ້ນ ບໍ່ເພິ່ງໃຫ້ບັງເກີດ ບໍ່ເພິ່ງໃຫ້ບັງເກີດຂຶ້ນ ເຊິ່ງທິດຖິດ້ວຍຍານໃນສະມາບັດ ໘ ຍານໃນອະພິນຍາ ໕ ມິດສາຍານ ສີນ ຂໍ້ວັດ ຫຼື ທັງສີນແລະຂໍ້ວັດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍຍະໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ບໍ່ເພິ່ງກຳນົດທິດຖິໃນໂລກດ້ວຍຍານ ຫຼື ແມ່ນດ້ວຍສີນຂໍ້ວັດ

ຄຳວ່າ ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າ ສະເໝີເຂົາ ອະທິບາຍວ່າ ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າ ເຮົາເປັນເຊັ່ນດຽວກັບເຂົາດ້ວຍຊາດ ໂຄດ ຄວາມເປັນບຸດຂອງຕະກູນ ຄວາມເປັນຜູ້ມີຮູບງາມ ຊັບ ການສຶກສາ ໜ້າທີ່ວຽກງານ ຫຼັກແຫ່ງສິລະປະວິທະຍາ ວິທະຍະຖານະ ຄວາມຄົງແກ່ຮຽນ ປະຕິພານ ຫຼື ສິ່ງອື່ນນອກຈາກທີ່ກ່າວແລ້ວ ລວມຄວາມວ່າ ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າ ສະເໝີເຂົາ

ຄຳວ່າ ບໍ່ເພິ່ງສຳຄັນຕົນວ່າດ້ອຍກວ່າເຂົາ ຫຼື ແມ່ນເລີດກວ່າເຂົາ ອະທິບາຍວ່າ ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າ ເຮົາດ້ອຍກວ່າເຂົາ ດ້ວຍຊາດ ໂຄດ ຯລຯ ຫຼື ສິ່ງອື່ນນອກຈາກທີ່ກ່າວແລ້ວ ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າ ເຮົາເລີດກວ່າເຂົາ ດ້ວຍຊາດ ໂຄດ ຯລຯ ຫຼື ສິ່ງອື່ນນອກຈາກທີ່ກ່າວແລ້ວ ລວມຄວາມວ່າ ບໍ່ເພິ່ງສຳຄັນຕົນວ່າດ້ອຍກວ່າເຂົາ ຫຼື ແມ່ນເລີດກວ່າເຂົາ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງກຳນົດທິດຖິໃນໂລກດ້ວຍຍານ ຫຼື
ແມ່ນດ້ວຍສີນແລະຂໍ້ວັດ
ບໍ່ເພິ່ງເອົາຕົນເຂົ້າໄປທຽບວ່າສະເໝີເຂົາ
ບໍ່ເພິ່ງສຳຄັນຕົນວ່າ ດ້ອຍກວ່າເຂົາ ຫຼືແມ່ນເລີດກວ່າເຂົາ

[໓໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸນັ້ນລະຕົນແລ້ວບໍ່ຢຶດຖື ບໍ່ສ້າງນິໄສແມ່ນດ້ວຍຍານ
ເມື່ອຊົນທັງຫຼາຍແຕກກັນ ພິກຂຸນັ້ນກໍບໍ່ເຂົ້າເປັນຝັກເປັນຝ່າຍ
ພິກຂຸນັ້ນບໍ່ຖືແມ່ນທິດຖິອັນໃດ ໆ

ຄຳວ່າ ລະຕົນແລ້ວ ໃນຄຳວ່າ ລະຕົນແລ້ວບໍ່ຢຶດຖື ໄດ້ແກ່ ລະຄວາມເຫັນວ່າເປັນຕົນ

ອີກໄນໜຶ່ງ ຄຳວ່າ ລະຕົນແລ້ວ ໄດ້ແກ່ ລະຄວາມຖື

ອີກໄນໜຶ່ງ ຄຳວ່າ ລະຕົນແລ້ວ ໄດ້ແກ່ ລະ ຄື ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຖື ຄວາມຢຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອ ດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິ ຊື່ວ່າລະຕົນແລ້ວ

ຄຳວ່າ ບໍ່ຢຶດຖື ໄດ້ແກ່ ບໍ່ຢຶດຖື ຄື ບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ດ້ວຍ ອຸປາທານ ໔ ລວມຄວາມວ່າ ລະຕົນແລ້ວບໍ່ຢຶດຖື

ຄຳວ່າ ພິກຂຸນັ້ນ ຯລຯ ບໍ່ສ້າງນິໄສດ້ວຍຍານ ອະທິບາຍວ່າ ບໍ່ສ້າງ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ເຊິ່ງນິໄສດ້ວຍອຳນາດຕັນຫາ ຫຼື ນິໄສດ້ວຍອຳນາດທິດຖິ ດ້ວຍຍານໃນສະມາບັດ ໘ ດ້ວຍຍານໃນອະພິນຍາ ໕ ຫຼື ດ້ວຍມິດສາຍານ ລວມຄວາມວ່າ ພິກຂຸນັ້ນ ຯລຯ ບໍ່ສ້າງນິໄສແມ່ນດ້ວຍຍານ

ຄຳວ່າ ເມື່ອຊົນທັງຫຼາຍແຕກກັນ ພິກຂຸນັ້ນກໍບໍ່ເຂົ້າເປັນຝັກເປັນຝ່າຍ ອະທິບາຍວ່າ ເມື່ອຊົນທັງຫຼາຍແຕກກັນ ຄື ແຍກກັນ ເຖິງຄວາມເປັນ ໔ ຝ່າຍ ກາຍເປັນຄົນ ໔ ພວກ ມີຄວາມເຫັນຕ່າງກັນ ມີຄວາມພໍໃຈຕ່າງກັນ ມີຄວາມຖືກໃຈຕ່າງກັນ ມີລັດທິຕ່າງກັນ ອາໄສນິໄສດ້ວຍອຳນາດທິດຖິຕ່າງກັນ ເຖິງສັນທາຄະຕິ (ລຳອຽງຍ້ອນຮັກ) ເຖິງໂທສາຄະຕິ (ລຳອຽງຍ້ອນຊັງ) ເຖິງໂມຫາຄະຕິ (ລຳອຽງຍ້ອນຫຼົງ) ເຖິງພະຍາຄະຕິ (ລຳອຽງຍ້ອນຢ້ານ) ພິກຂຸນັ້ນກໍບໍ່ເຖິງສັນທາຄະຕິ ບໍ່ເຖິງໂທສາຄະຕິ ບໍ່ເຖິງໂມຫາຄະຕິ ບໍ່ເຖິງພະຍາຄະຕິ ຄື ບໍ່ດຳເນີນໄປດ້ວຍອຳນາດຣາຄະ ບໍ່ດຳເນີນໄປດ້ວຍອຳນາດໂທສະ ບໍ່ດຳເນີນໄປດ້ວຍອຳນາດໂມຫະ ບໍ່ດຳເນີນໄປດ້ວຍອຳນາດມານະ ບໍ່ດຳເນີນໄປດ້ວຍອຳນາດທິດຖິ ບໍ່ດຳເນີນໄປດ້ວຍອຳນາດ ອຸດທັດຈະບໍ່ດຳເນີນໄປດ້ວຍອຳນາດວິຈິກິດສາ ບໍ່ດຳເນີນໄປດ້ວຍອຳນາດອະນຸໄສ ໄດ້ແກ່ ບໍ່ໄປ ຄື ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປດ້ວຍທຳທີ່ກໍ່ຄວາມເປັນຝັກເປັນຝ່າຍ ລວມຄວາມວ່າ ເມື່ອຊົນທັງຫຼາຍແຕກກັນ ພິກຂຸນັ້ນກໍບໍ່ເຂົ້າເປັນຝັກເປັນຝ່າຍໃດຝ່າຍໜຶ່ງ

ຄຳວ່າ ພິກຂຸນັ້ນບໍ່ຖືແມ່ນທິດຖິອັນໃດ ໆ ອະທິບາຍວ່າ ທິດຖິທັງ ໖໒ ພິກຂຸນັ້ນລະ ໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ

ເຜົາດ້ວຍໄຟຄືຍານແລ້ວ ພິກຂຸນັ້ນຈຶ່ງບໍ່ຖື ຄືບໍ່ຫວນກັບມາຫາທິດຖິອັນໃດ ໆ ອີກ ລວມຄວາມວ່າ ພິກຂຸນັ້ນບໍ່ຖືແມ່ນທິດຖິອັນໃດ ໆ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸນັ້ນລະຕົນແລ້ວບໍ່ຍຶດຖື ບໍ່ສ້າງນິໄສແມ່ນດ້ວຍຍານ
ເມື່ອຊົນທັງຫຼາຍແຕກກັນ ພິກຂຸນັ້ນກໍບໍ່ເຂົ້າເປັນຝັກເປັນຝ່າຍ
ພິກຂຸນັ້ນບໍ່ຖືແມ່ນທິດຖິອັນໃດ ໆ

[໘໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພຣະອະຣະຫັນໃດ ຜູ້ບໍ່ມີຄວາມຄະນຶງ
ຫາໃນສ່ວນສຸດທັງ ໔ ດ້ານ ໃນໂລກນີ້
ໃນພົບນ້ອຍພົບໃຫຍ່ ໃນໂລກນີ້ຫຼືໃນໂລກໜ້າ
ພຣະອະຣະຫັນນັ້ນຈຶ່ງບໍ່ມີເຄື່ອງຢູ່ອັນໃດ ໆ
ຄວາມຕົກລົງໃຈໃນທຳທັງຫຼາຍແລ້ວຖືໝັ້ນກໍບໍ່ມີ

## ວ່າດ້ວຍພູມທຳຂອງພຣະອະຣະຫັນ

ຄຳວ່າ ໃດ ໃນຄຳວ່າ ພຣະອະຣະຫັນໃດ ຜູ້ບໍ່ມີຄວາມຄະນຶງຫາໃນສ່ວນສຸດທັງ ໔ ດ້ານ ໃນໂລກນີ້ ໃນພົບນ້ອຍພົບໃຫຍ່ ໃນໂລກນີ້ຫຼືໃນໂລກໜ້າ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ສ່ວນສຸດ ອະທິບາຍວ່າ ຜັດສະເປັນສ່ວນສຸດດ້ານໜຶ່ງ ເຫດເກີດແຫ່ງຜັດສະເປັນສ່ວນສຸດອີກດ້ານໜຶ່ງ ອະດີດເປັນສ່ວນສຸດດ້ານໜຶ່ງ ອະນາຄົດເປັນສ່ວນສຸດອີກດ້ານໜຶ່ງ ສຸກຂະເວທະນາເປັນສ່ວນສຸດດ້ານໜຶ່ງ ທຸກຂະເວທະນາເປັນສ່ວນສຸດອີກດ້ານໜຶ່ງ ນາມເປັນສ່ວນສຸດດ້ານໜຶ່ງ ຮູບເປັນສ່ວນສຸດອີກດ້ານໜຶ່ງ ອາຍະຕະນະພາຍໃນ ໖ ເປັນສ່ວນສຸດດ້ານໜຶ່ງ ອາຍະຕະນະພາຍນອກ ໖ ເປັນສ່ວນສຸດອີກດ້ານໜຶ່ງ ຄວາມຖືຕົວເປັນສ່ວນສຸດດ້ານໜຶ່ງ ເຫດເກີດແຫ່ງຄວາມຖືຕົວເປັນສ່ວນສຸດອີກດ້ານໜຶ່ງ ຕັນຫາຕັດຮຽກວ່າ ຄວາມຄະນຶງຫາ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຄຳວ່າ ໃນພົບນ້ອຍພົບໃຫຍ່ ອະທິບາຍວ່າ ໃນພົບນ້ອຍພົບໃຫຍ່ ຄື ໃນກຳມະວັດແລະວິປາກະວັດ ໃນກຳມະວັດເປັນເຄື່ອງເກີດໃນກາມະພົບ ໃນວິປາກະວັດເປັນເຄື່ອງເກີດໃນ ກາມະພົບ ໃນກຳມະວັດເປັນເຄື່ອງເກີດໃນຮູບພົບ ໃນວິປາກະວັດເປັນເຄື່ອງເກີດໃນຮູບພົບ ໃນກຳມະວັດເປັນເຄື່ອງເກີດໃນອະຮູບພົບ ໃນວິປາກະວັດເປັນເຄື່ອງເກີດໃນອະຮູບພົບ ໃນພົບຕໍ່ໄປ ໃນຄະຕິ ຕໍ່ໄປ ໃນການຖືກຳເນີດຕໍ່ໄປ ໃນປະຕິສົນທິຕໍ່ໄປ ໃນຄວາມບັງເກີດແຫ່ງອັດຕະພາບຕໍ່ໄປ

ຄຳວ່າ ໂລກນີ້ ໄດ້ແກ່ ອັດຕະພາບຂອງຕົນ

ຄຳວ່າ ໂລກໜ້າ ໄດ້ແກ່ ອັດຕະພາບຂອງຜູ້ອື່ນ

ອີກໄນໜຶ່ງ ຄຳວ່າ ໂລກນີ້ ໄດ້ແກ່ ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ຂອງຕົນ

ຄຳວ່າ ໂລກໜ້າ ໄດ້ແກ່ ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ຂອງຜູ້ອື່ນ

ອີກໄນໜຶ່ງ ຄຳວ່າ ໂລກນີ້ ໄດ້ແກ່ ອາຍະຕະນະພາຍໃນ ໖

ຄຳວ່າ ໂລກໜ້າ ໄດ້ແກ່ ອາຍະຕະນະພາຍນອກ ໖

ຄຳວ່າ ໂລກນີ້ ໄດ້ແກ່ ມະນຸດໂລກ

ຄຳວ່າ ໂລກໜ້າ ໄດ້ແກ່ ເທວະໂລກ

ຄຳວ່າ ໂລກນີ້ ໄດ້ແກ່ ກາມທາດ

ຄຳວ່າ ໂລກໜ້າ ໄດ້ແກ່ ຮູບທາດ ອະຮູບທາດ

ຄຳວ່າ ໂລກນີ້ ໄດ້ແກ່ ກາມທາດ ຮູບທາດ

ຄຳວ່າ ໂລກໜ້າ ໄດ້ແກ່ ອະຮູບທາດ

ຄຳວ່າ ພຣະອະຣະຫັນໃດ ຜູ້ບໍ່ມີຄວາມຄະນຶງຫາໃນສ່ວນສຸດທັງ ໒ ດ້ານ ໃນໂລກນີ້ ໃນພົບນ້ອຍພົບໃຫຍ່ ໃນໂລກນີ້ຫຼືໃນໂລກໜ້າ ອະທິບາຍວ່າ ພຣະອະຣະຫັນໃດ ຍ່ອມບໍ່ມີ ຄື ບໍ່ຜາກົດ ຫາບໍ່ໄດ້ເຊິ່ງຕັນຫາ ເປັນທີ່ຄະນຶງຫາໃນສ່ວນສຸດທັງ ໒ ດ້ານໃນພົບນ້ອຍພົບໃຫຍ່ ໃນໂລກນີ້ ຫຼື ໃນໂລກໜ້າ ຄື ຕັນຫາ ພຣະອະຣະຫັນໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ພຣະອະຣະຫັນໃດ ຜູ້ບໍ່ມີຄວາມຄະນຶງຫາໃນສ່ວນສຸດທັງ ໒ ດ້ານໃນໂລກນີ້ ໃນພົບນ້ອຍພົບໃຫຍ່ ໃນໂລກນີ້ ຫຼື ໃນໂລກໜ້າ

ຄຳວ່າ ເຄື່ອງຢູ່ ໃນຄຳວ່າ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີເຄື່ອງຢູ່ອັນໃດ ໆ ໄດ້ແກ່ ເຄື່ອງຢູ່ ໒ ຢ່າງ ຄື (໑) ເຄື່ອງຢູ່ດ້ວຍອຳນາດຕັນຫາ (໒) ເຄື່ອງຢູ່ດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າເຄື່ອງຢູ່ດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າເຄື່ອງຢູ່ດ້ວຍອຳນາດທິດຖິ

ຄຳວ່າ ນັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີເຄື່ອງຢູ່ອັນໃດ ໆ ອະທິບາຍວ່າ ພຣະອະຣະຫັນນັ້ນບໍ່ມີ ຄື ຍ່ອມບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເຊິ່ງເຄື່ອງຢູ່ອັນໃດ ໆ ໄດ້ແກ່ ເຄື່ອງຢູ່ ອັນໃດ ໆ ພຣະອະຣະຫັນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ພຣະອະຣະຫັນນັ້ນ ຈຶ່ງບໍ່ມີເຄື່ອງຢູ່ອັນໃດ ໆ

ຄຳວ່າ ໃນທຳທັງຫຼາຍ ໃນຄຳວ່າ ຄວາມຕົກລົງໃຈໃນທຳທັງຫຼາຍແລ້ວຖືໝັ້ນ ໄດ້ແກ່ ໃນທິດຖິ ໖໒

ຄຳວ່າ ຕຶກລຶງໃຈແລ້ວ ໄດ້ແກ່ ຕຶກລຶງໃຈແລ້ວ ຄື ພິຈາລະນາແລ້ວ ຕັດສິນແລ້ວ ຊີ້ຂາດແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ

ຄຳວ່າ ຖືໝັ້ນ ໄດ້ແກ່ ຈັບໝັ້ນ ຍຶດໝັ້ນ ຖືໝັ້ນ ລວບຖື ລວມຖື ລວບລວມຖື ຄື ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອວ່າ ສິ່ງນີ້ຈິງ ແທ້ ແນ່ ແທ້ຈິງຕາມເປັນຈິງ ບໍ່ວິປະຣິດ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ພຣະອະຣະຫັນນັ້ນ ໄດ້ແກ່ ຄວາມຕຶກລຶງໃຈແລ້ວຖືໝັ້ນນັ້ນ ພຣະອະຣະຫັນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບ ໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ຄວາມຕຶກລຶງໃຈໃນທຳທັງຫຼາຍແລ້ວຖືໝັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພຣະອະຣະຫັນໃດ ຜູ້ບໍ່ມີຄວາມຄະນຶງ
ຫາໃນສ່ວນສຸດທັງ ໘ ດ້ານໃນໂລກນີ້
ໃນພົບນ້ອຍພົບໃຫຍ່ ໃນໂລກນີ້ ຫຼື ໃນໂລກໜ້າ
ພຣະອະຣະຫັນນັ້ນຈຶ່ງບໍ່ມີເຄື່ອງຢູ່ອັນໃດ ໆ
ຄວາມຕຶກລຶງໃຈໃນທຳທັງຫຼາຍແລ້ວຖືໝັ້ນກໍບໍ່ມີ

[໘໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພຣະອະຣະຫັນນັ້ນ ບໍ່ມີທິດຖິອັນສັນຍາກຳນົດໄວ້ແມ່ນບໍ່ຫຼາຍ
ໃນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ຫຼືໃນອາລົມທີ່ຮັບຮູ້ໃນໂລກນີ້
ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດພຣະອະຣະຫັນນັ້ນ
ຜູ້ເປັນພາມ ບໍ່ຍຶດຖືທິດຖິຢູ່ ດ້ວຍເຫດອັນໃດນໍ?

## ວ່າດ້ວຍພຣະອະຣະຫັນໄດ້ຊື່ວ່າພາມ

ຄຳວ່າ ນັ້ນ ໃນຄຳວ່າ ພຣະອະຣະຫັນນັ້ນ ບໍ່ມີທິດຖິອັນສັນຍາກຳນົດໄວ້ແມ່ນໜ້ອຍໜຶ່ງໃນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ຫຼື ໃນອາລົມທີ່ຮັບຮູ້ໃນໂລກນີ້ ອະທິບາຍວ່າ ພຣະອະຣະຫັນຕະຂີນາສົບນັ້ນບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເຊິ່ງທິດຖິ ອັນສັນຍາໃຫ້ເກີດ ໃຫ້ເກີດຂຶ້ນ ກຳນົດກຳນົດໄວ້ ປຸງແຕ່ງ ປຸງແຕ່ງຂຶ້ນ ຕັ້ງໄວ້ດີແລ້ວ ຍ້ອນມີສັນຍາເປັນຫົວໜ້າ ມີສັນຍາກຳນົດໄວ້ ແລະຍ້ອນການແຍກສັນຍາໃນຮູບທີ່ເຫັນ ຫຼື ໃນຄວາມມົດຈົດຍ້ອນຮູບທີ່ເຫັນໃນສຽງທີ່ໄດ້ຍິນ ຫຼື ໃນຄວາມມົດຈົດຍ້ອນສຽງທີ່ໄດ້ຍິນ ໃນອາລົມທີ່ຮັບຮູ້ ຫຼື ໃນຄວາມມົດຈົດຍ້ອນອາລົມທີ່ຮັບຮູ້ ຄື ທິດຖິນັ້ນພຣະອະຣະຫັນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ພຣະອະຣະຫັນນັ້ນ ບໍ່ມີທິດຖິອັນສັນຍາກຳນົດໄວ້ແມ່ນບໍ່ຫຼາຍໃນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ຫຼືໃນອາລົມທີ່ຮັບຮູ້ໃນໂລກນີ້

ຄຳວ່າ ພາມ ໃນຄຳວ່າ ພຣະອະຣະຫັນນັ້ນ ຜູ້ເປັນພາມ ບໍ່ຍຶດຖືທິດຖິຢູ່ ອະທິບາຍວ່າ ທີ່ຊື່ວ່າພາມ ຍ້ອນລອຍທຳ ໆ ປະການໄດ້ແລ້ວ ຄື

໑. ລອຍສັກກາຍະທິດຖິໄດ້ແລ້ວ ຯລຯ ບໍ່ມີຕັນຫາແລະທິດຖິອາໄສເປັນຜູ້ໝັ້ນຄົງ ບັນດິດຮຽກຜູ້ນັ້ນວ່າເປັນພາມ

ຄຳວ່າ ພຣະອະຣະຫັນນັ້ນ ຜູ້ເປັນພາມ ບໍ່ຍຶດຖືທິດຖິຢູ່ ອະທິບາຍວ່າ ພຣະອະຣະຫັນນັ້ນຜູ້ເປັນພາມ ບໍ່ຍຶດຖື ຄື ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິຢູ່ ລວມຄວາມວ່າ ພຣະອະຣະຫັນນັ້ນ ຜູ້ເປັນພາມ ບໍ່ຍຶດຖືທິດຖິຢູ່

ຄຳວ່າ ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດ ຯລຯ ດ້ວຍເຫດອັນໃດນໍ? ອະທິບາຍວ່າ

ຄຳວ່າ ການກຳນົດ ໄດ້ແກ່ ການກຳນົດ ໒ ຢ່າງ ຄື

໑. ການກຳນົດດ້ວຍອຳນາດຕັນຫາ

໒. ການກຳນົດດ້ວຍອຳນາດທິດຖິ ຯລຯ

ນີ້ຊື່ວ່າ ການກຳນົດດ້ວຍອຳນາດຕັນຫາ ຯລຯ

ນີ້ຊື່ວ່າການກຳນົດດ້ວຍອຳນາດທິດຖິ

ພຣະອະຣະຫັນນັ້ນລະການກຳນົດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ໃຜ ໆ ຈະເພິ່ງກຳນົດພຣະອະຣະຫັນນັ້ນດ້ວຍຣາຄະ ໂທສະ ໂມຫະ ມານະ ທິດຖິ ອຸດທັດຈະ ວິຈິກິດສາ ອະນຸໄສ ອັນໃດນໍ? ວ່າ ເປັນຜູ້ກຳໜັດ ເປັນຜູ້ຂັດເຄືອງ ເປັນຜູ້ຫຼົງ ເປັນຜູ້ຍຶດຕິດ ເປັນຜູ້ຍຶດໝັ້ນ ເປັນຜູ້ຟຸ້ງຊ່ານ ເປັນຜູ້ລັງເລ ຫຼືເປັນ ຜູ້ຕົກຢູ່ໃນກຳລັງກິເລດ

ພຣະອະຣະຫັນລະອະພິສັງຂານເຫຼົ່ານັ້ນໄດ້ແລ້ວ ຍ້ອນເປັນຜູ້ລະອະພິສັງຂານໄດ້ແລ້ວ ໃຜ ໆ ຈະເພິ່ງກຳນົດຄະຕິດ້ວຍເຫດອັນໃດນໍ? ວ່າ ເປັນຜູ້ເກີດໃນນະຣົກ ເປັນຜູ້ເກີດໃນກຳເນີດເດຍຣັດສານ ເປັນຜູ້ເກີດໃນເຜດວິໄສ ເປັນມະນຸດ ເປັນເທບ ເປັນຜູ້ມີຮູບ ເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼື ວ່າເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ໃຜ ໆ ຈະເພິ່ງກຳນົດ ຄື ກຳນົດຮູ້ ເຖິງການກຳນົດຮູ້ດ້ວຍເຫດ ປັດໄຈ ແລະການໃດ ເຫດ ປັດໄຈ ແລະການນັ້ນບໍ່ມີ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ໃຜ ໆ ໃນໂລກນີ້ຈະເພິ່ງກຳນົດ ຯລຯ ດ້ວຍເຫດອັນໃດນໍ? ດ້ວຍ ເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພຣະອະຣະຫັນນັ້ນ ບໍ່ມີທິດຖິອັນສັນຍາກໍານົດໄວ້ແມ່ນບໍ່ຫຼາຍ
ໃນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ຫຼືໃນອາລົມທີ່ຮັບຮູ້ໃນໂລກນີ້
ໃຜ ໆ ໃນໂລກນີ້ຈະເພິ່ງກໍານົດພຣະອະຣະຫັນນັ້ນ
ຜູ້ເປັນພາມ ບໍ່ຢຶດຖືທິດຖິຢູ່ ດ້ວຍເຫດອັນໃດນໍ?

[໓໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພຣະອະຣະຫັນຕະຂີນາສົບທັງຫຼາຍ
ຍ່ອມບໍ່ກໍານົດ ບໍ່ເຊີດຊູ
ແມ່ນທໍາທັງຫຼາຍ ພຣະອະຣະຫັນເຫຼົ່ານັ້ນກໍບໍ່ປາຖະໜາແລ້ວ
ພຣະອະຣະຫັນຜູ້ເປັນພາມນັ້ນ ໃຜ ໆ ຈຶ່ງນໍາໄປດ້ວຍສິນແລະຂໍ້ວັດບໍ່ໄດ້
ເປັນຜູ້ເຖິງຝັ່ງແລ້ວ ບໍ່ກັບມາ ເປັນຜູ້ໝັ້ນຄົງ

## ວ່າດ້ວຍການກໍານົດ ໒

ຄໍາວ່າ ຍ່ອມບໍ່ກໍານົດ ບໍ່ເຊີດຊູ ອະທິບາຍວ່າ

ຄໍາວ່າ ກໍານົດ ໄດ້ແກ່ ການກໍານົດ ໒ ຢ່າງ ຄື (໑) ການກໍານົດດ້ວຍອໍານາດ ຕັນຫາ (໒) ການກໍານົດດ້ວຍອໍານາດທິດຖິ ຯລຯ ນີ້ຊື່ວ່າການກໍານົດດ້ວຍອໍານາດຕັນຫາ ຯລຯ ນີ້ຊື່ວ່າການກໍານົດດ້ວຍອໍານາດທິດຖິ

ການກໍານົດດ້ວຍອໍານາດຕັນຫາ ເປັນແນວໃດ?

ຄື ວັດຖຸທີ່ເຮັດໃຫ້ເປັນເຂດ ເປັນແດນ ເປັນສ່ວນ ເປັນຜະແໜກ ກໍານົດຖືເອົາ ຢຶດຖືວ່າເປັນຂອງເຮົາ ດ້ວຍສ່ວນແຫ່ງຕັນຫາມີປະມານເທົ່າໃດ ຍ່ອມຢຶດຖືວ່າເປັນຂອງເຮົາ ເຊິ່ງ ວັດຖຸມີປະມານເທົ່ານັ້ນວ່າ ນີ້ຂອງເຮົາ ນັ້ນຂອງເຮົາ ເທົ່ານີ້ຂອງເຮົາ ຂອງເຮົາມີປະມານເທົ່ານີ້ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຊາຍຍິງ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ທີ່ນາ ທີ່ສວນ ເງິນຄໍາ ໝູ່ບ້ານ ນິຄົມ ຣາດຊະທານີ ແຄວ້ນ ຊົນນະບົດ ກອງພົນ ຮົບ ຄັງຫຼວງ ແມ່ນມະຫາປະຖະພີທັງໝົດຍ່ອມຢຶດຖືວ່າເປັນຂອງເຮົາດ້ວຍອໍານາດ ຕັນຫາ ເຊິ່ງຈໍາແນກໄດ້ ໑໐໘ ນີ້ຊື່ວ່າການກໍານົດດ້ວຍອໍານາດຕັນຫາ

ການກໍານົດດ້ວຍອໍານາດທິດຖິ ເປັນແນວໃດ?

ຄື ສັກກາຍະທິດຖິມີວັດຖຸ ໒໐ ມິດສາທິດຖິມີວັດຖຸ ໑໐ ອັນຕະຄາຫິກະທິດຖິມີວັດຖຸ ໑໐ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບຄືທິດຖິ ຄວາມກັນດານຄືທິດຖິ ສັ່ງນໜາມ ຄືທິດຖິ ຄວາມດີ້ນຮົນຄືທິດຖິ ເຄື່ອງຜູກພັນຄືທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຢຶດໝັ້ນ ຄວາມຢຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖື ຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິ

ປະລາດ ຄວາມຖືຜິດ ຄວາມຖືໃນສິ່ງທີ່ບໍ່ເປັນ ຄວາມຈິງວ່າເປັນຈິງເຫັນປານນີ້ ຈົນເຖິງທິດຖິ ໖໒ ນີ້ຊື່ວ່າການກຳນົດດ້ວຍອຳນາດທິດຖິ

ພຣະອະຣະຫັນເຫຼົ່ານັ້ນ ລະການກຳນົດດ້ວຍຕັນຫາໄດ້ແລ້ວ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ພຣະອະຣະຫັນຈຶ່ງບໍ່ກຳນົດ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ເຊິ່ງການກຳນົດດ້ວຍອຳນາດຕັນຫາ ຫຼື ການກຳນົດດ້ວຍອຳນາດທິດຖິ ລວມຄວາມວ່າ ຍ່ອມບໍ່ກຳນົດ

ຄຳວ່າ ບໍ່ເຊີດຊູ ອະທິບາຍວ່າ

ຄຳວ່າ ເຊີດຊູ ໄດ້ແກ່ ການເຊີດຊູ ໒ ຢ່າງ ຄື (໑) ການເຊີດຊູດ້ວຍອຳນາດຕັນຫາ (໒) ການເຊີດຊູດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າການເຊີດຊູດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການເຊີດຊູດ້ວຍອຳນາດທິດຖິ

ພຣະອະຣະຫັນເຫຼົ່ານັ້ນ ລະການເຊີດຊູດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການເຊີດຊູ ດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການເຊີດຊູດ້ວຍອຳນາດຕັນຫາ ສະລັດຖິ້ມການເຊີດຊູດ້ວຍອຳນາດທິດຖິໄດ້ແລ້ວ ພຣະອະຣະຫັນກໍບໍ່ທ່ຽວເຊີດຊູຕັນຫາຫຼືທິດຖິໄວ້ ຄື ບໍ່ມີຕັນຫາເປັນທຸງໄຊ ບໍ່ມີຕັນຫາເປັນຍອດທຸງ ບໍ່ມີຕັນຫາເປັນໃຫຍ່ ບໍ່ມີທິດຖິເປັນທຸງໄຊ ບໍ່ມີທິດຖິເປັນຍອດທຸງ ບໍ່ມີທິດຖິເປັນໃຫຍ່ ຄື ບໍ່ໄດ້ຖືກຕັນຫາຫຼືທິດຖິຄອບງຳທ່ຽວໄປຢູ່ ລວມຄວາມວ່າ ຍ່ອມບໍ່ກຳນົດ ບໍ່ເຊີດຊູ

ຄຳວ່າ ແມ່ນທຳທັງຫຼາຍພຣະອະຣະຫັນເຫຼົ່ານັ້ນ ກໍບໍ່ປາຖະໜາແລ້ວ ອະທິບາຍວ່າ ທິດຖິ ໖໒ ຕັດຮຽກວ່າ ທຳ

ຄຳວ່າ ເຫຼົ່ານັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນ

ຄຳວ່າ ບໍ່ປາຖະໜາແລ້ວ ອະທິບາຍວ່າ ບໍ່ປາຖະໜາແລ້ວວ່າ ໂລກທ່ຽງ ນີ້ເທົ່ານັ້ນ ຈິງ ຢ່າງອື່ນເປັນໂມຄະ ບໍ່ປາຖະໜາແລ້ວວ່າ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດ ຈະວ່າເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ແມ່ນທຳທັງຫຼາຍພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນ ກໍບໍ່ປາຖະໜາແລ້ວ

ຄຳວ່າ ບໍ່ ໃນຄຳວ່າ ພຣະອະຣະຫັນຜູ້ເປັນພາມ ໃຜ ໆ ຈຶ່ງນຳໄປດ້ວຍສິນແລະຂໍ້ວັດບໍ່ໄດ້ເປັນຄຳປະຕິເສດ

ຄຳວ່າ ຜູ້ເປັນພາມ ອະທິບາຍວ່າ ທີ່ຊື່ວ່າພາມຍ້ອນລອຍທຳ ໗ ປະການໄດ້ ແລ້ວ ຄື

໑. ລອຍສັກກາຍະທິດຖິໄດ້ແລ້ວ ຯລຯ ບໍ່ມີຕັນຫາ ແລະທິດຖິອາໄສ ເປັນຜູ້ໝັ້ນຄົງບັນດິດຮຽກຜູ້ນັ້ນວ່າ ເປັນພາມ

ຄຳວ່າ ຜູ້ເປັນພານ ໃຜ ໆ ກໍນຳໄປດ້ວຍສິນແລະຂໍ້ວັດບໍ່ໄດ້ ອະທິບາຍວ່າ ຜູ້ເປັນ ພານ ຍ່ອມບໍ່ດຳເນີນໄປ ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປດ້ວຍສິນ ຂໍ້ວັດ ຫຼື ສິນແລະຂໍ້ວັດ ລວມຄວາມວ່າ ຜູ້ເປັນພານ ໃຜ ໆ ຈຶ່ງນຳໄປດ້ວຍສິນແລະຂໍ້ວັດບໍ່ໄດ້

ຄຳວ່າ ເປັນຜູ້ເຖິງຝັ່ງແລ້ວ ບໍ່ກັບມາ ເປັນຜູ້ໝັ້ນຄົງ ອະທິບາຍວ່າ ອະມະຕະນິບພານ ຕັດຮຽກວ່າ ຝັ່ງ ຄື ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ພຣະອະຣະຫັນນັ້ນ ເຖິງຝັ່ງ ບັນລຸຝັ່ງ ເຖິງສ່ວນສຸດ ບັນລຸສ່ວນສຸດ ເຖິງປາຍສຸດ ບັນລຸປາຍສຸດ ພຣະອະຣະຫັນນັ້ນບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ເປັນຜູ້ເຖິງຝັ່ງແລ້ວ

ຄຳວ່າ ບໍ່ກັບມາ ອະທິບາຍວ່າ ກິເລດເຫຼົ່າໃດອະຣິຍະບຸກຄົນລະໄດ້ແລ້ວ ດ້ວຍໂສດາປັດຕິມັກ ອະຣິຍະບຸກຄົນກໍບໍ່ມາ ບໍ່ກັບມາ ຄື ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດອະຣິຍະບຸກຄົນລະໄດ້ແລ້ວດ້ວຍສະກະທາຄາມິມັກ ອະຣິຍະບຸກຄົນກໍບໍ່ມາ ບໍ່ກັບມາ ຄື ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດ ອະຣິຍະບຸກຄົນລະໄດ້ແລ້ວດ້ວຍ ອະນາຄາມິມັກ ອະຣິຍະບຸກຄົນກໍບໍ່ມາ ບໍ່ກັບມາ ຄື ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດ ອະຣິຍະບຸກຄົນລະໄດ້ແລ້ວດ້ວຍອະຣະຫັດຕະມັກ ອະຣິຍະບຸກຄົນກໍບໍ່ມາ ບໍ່ກັບມາ ຄື ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ລວມຄວາມວ່າ ເປັນຜູ້ເຖິງຝັ່ງ ບໍ່ກັບມາ

## ວ່າດ້ວຍພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ

ຄຳວ່າ ເປັນຜູ້ໝັ້ນຄົງ ອະທິບາຍວ່າ ພຣະອະຣະຫັນ ເປັນຜູ້ໝັ້ນຄົງດ້ວຍອາການ ໕ ຢ່າງ ຄື

໑. ເປັນຜູ້ໝັ້ນຄົງ ໃນອິດຖາຣົມແລະອະນິດຖາຣົມ
໒. ເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ສະລະແລ້ວ
໓. ເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ຂ້າມໄດ້ແລ້ວ
໔. ເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ພົ້ນແລ້ວ
໕. ເປັນຜູ້ໝັ້ນຄົງ ຍ້ອນສະແດງອອກເຊິ່ງທຳນັ້ນ ໆ

ພຣະອະຣະຫັນເປັນຜູ້ໝັ້ນຄົງໃນອິດຖາຣົມແລະອະນິດຖາຣົມ ເປັນແນວໃດ?

ຄື ພຣະອະຣະຫັນເປັນຜູ້ໝັ້ນຄົງທັງໃນລາບ ແລະໃນຄວາມເສື່ອມລາບ ເປັນຜູ້ໝັ້ນຄົງທັງໃນຍົດ ແລະໃນຄວາມເສື່ອມຍົດ ເປັນຜູ້ໝັ້ນຄົງທັງໃນສັນເສີນແລະນິນທາ ເປັນຜູ້ໝັ້ນຄົງທັງໃນສຸກແລະທຸກ ຄົນບາງພວກເອົາຂອງຫອມຊະໂລມແຂນຂ້າງໜຶ່ງ ອີກພວກໜຶ່ງໃຊ້ມີດຖາກແຂນອີກຂ້າງໜຶ່ງ ພຣະອະຣະຫັນກໍບໍ່ມີຄວາມຍິນດີໃນການຊະໂລມດ້ວຍຂອງຫອມນັ້ນ ບໍ່ມີຄວາມຍິນຮ້າຍໃນການຖາກແຂນນັ້ນ ພຣະອະຣະຫັນລະຄວາມຍິນດີແລະຄວາມຍິນຮ້າຍໄດ້ແລ້ວ

ລ່ວງພົ້ນຄວາມດີໃຈແລະຄວາມເສຍໃຈໄດ້ແລ້ວ ກ້າວລ່ວງຄວາມຍິນດີແລະຄວາມຍິນຮ້າຍໄດ້ແລ້ວ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງໃນອິດຖາຣົມແລະອະນິດຖາຣົມ ເປັນແນວນີ້

ພຣະອະຣະຫັນເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ສະລະແລ້ວ ເປັນແນວໃດ?

ຄື ພຣະອະຣະຫັນ ສະລະ ຄາຍ ປ່ອຍ ລະ ສະລັດຖິ້ມ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ພຣະອະຣະຫັນສະລະ ຄາຍ ປ່ອຍ ລະ ສະລັດຖິ້ມອະກຸສະລາພິສັງຂານທຸກປະເພດໄດ້ແລ້ວ ພຣະອະຣະຫັນຊື່ວ່າເປັນຜູ້ ໝັ້ນຄົງ ຍ້ອນເປັນຜູ້ສະລະແລ້ວ ເປັນແນວນີ້

ພຣະອະຣະຫັນເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ຂ້າມໄດ້ແລ້ວ ເປັນແນວໃດ?

ຄື ພຣະອະຣະຫັນຂ້າມ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ທາງແຫ່ງສົງສານທັງປວງໄດ້ແລ້ວ ພຣະອະຣະຫັນນັ້ນຢູ່ (ໃນອະຣິຍະວາສະທໍາ) ແລ້ວ ປະພຶດຈະຣະນະທໍາແລ້ວ ພຣະອະຣະຫັນນັ້ນບໍ່ມີການວຽນເກີດ ວຽນ ຕາຍ ແລະພົບໃໝ່ກໍບໍ່ມີອີກ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ຂ້າມໄດ້ແລ້ວ ເປັນແນວນີ້

ພຣະອະຣະຫັນເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ພົ້ນແລ້ວ ເປັນແນວໃດ?

ຄື ພຣະອະຣະຫັນມີຈິດພົ້ນ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີແລ້ວຈາກຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ພຣະອະຣະຫັນມີຈິດພົ້ນ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີແລ້ວຈາກອະກຸສະລາພິສັງຂານທຸກປະເພດ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ພົ້ນແລ້ວ ເປັນແນວນີ້

ພຣະອະຣະຫັນເປັນຜູ້ໝັ້ນຄົງ ຍ້ອນສະແດງອອກເຊິ່ງທໍານັ້ນ ໆ ເປັນແນວໃດ?

ຄື ເມື່ອສີນມີຢູ່ ພຣະອະຣະຫັນຊື່ວ່າ ເປັນຜູ້ໝັ້ນຄົງ ຍ້ອນສະແດງອອກວ່າ ເປັນຜູ້ມີສີນ

ເມື່ອສັດທາມີຢູ່ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນສະແດງອອກວ່າ ເປັນຜູ້ມີສັດທາ

ເມື່ອຄວາມພຽນມີຢູ່ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງຍ້ອນສະແດງອອກວ່າ ເປັນຜູ້ມີຄວາມພຽນ

ເມື່ອສະຕິມີຢູ່ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນສະແດງອອກວ່າ ເປັນຜູ້ມີສະຕິ

ເມື່ອສະມາທິມີຢູ່ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນສະແດງອອກວ່າ ເປັນຜູ້ຕັ້ງໝັ້ນ

ເມື່ອປັນຍາມີຢູ່ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນສະແດງອອກວ່າ ເປັນຜູ້ມີປັນຍາ

ເມື່ອວິດຊາມີຢູ່ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນສະແດງອອກວ່າ ເປັນຜູ້ມີວິດຊາ ໑

ເມື່ອອະພິນຍາມີຢູ່ ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນສະແດງອອກວ່າ ເປັນຜູ້ມີອະພິນຍາ ໖

ພຣະອະຣະຫັນຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນສະແດງອອກເຊິ່ງທຳນັ້ນ ໆ ເປັນແນວນີ້

ລວມຄວາມວ່າ ເປັນຜູ້ເຖິງຝັ່ງ ບໍ່ກັບມາ ເປັນຜູ້ໝັ້ນຄົງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພຣະອະຣະຫັນຕະຂີນາສົບທັງຫຼາຍ
ຍ່ອມບໍ່ກຳນົດ ບໍ່ເຊີດຊູ
ແມ່ນທຳທັງຫຼາຍພຣະອະຣະຫັນເຫຼົ່ານັ້ນກໍບໍ່ປາຖະໜາແລ້ວ
ພຣະອະຣະຫັນຜູ້ເປັນພາມນັ້ນ ໃຜ ໆ ຈຶ່ງນຳໄປດ້ວຍສິນແລະຂໍ້ວັດບໍ່ໄດ້
ເປັນຜູ້ເຖິງຝັ່ງແລ້ວ ບໍ່ກັບມາ ເປັນຜູ້ໝັ້ນຄົງ

**ປະຣະມັດຖະກະສຸດຕະນິດເທດທີ ໕ ຈົບ**

# ໖. ຊະຣາສຸດຕະນິດເທດ

## ອະທິບາຍຊະຣາສູດ

### ວ່າດ້ວຍຊະຣາ

ພຣະສາຣີບຸດເຖຣະຈະກ່າວອະທິບາຍຊະຣາສູດ ດັ່ງຕໍ່ໄປນີ້

[໓໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຊີວິດນີ້ໜ້ອຍດຽວ ມະນຸດຍ່ອມຕາຍພາຍໃນ ໑໐໐ ປີ
ແມ່ນຫາກຜູ້ໃດຈະມີຊີວິດຢູ່ເກີນໄປກວ່ານັ້ນ
ຜູ້ນັ້ນກໍຈະຕາຍຍ້ອນຊະຣາຢ່າງແນ່ນອນ

### ວ່າດ້ວຍຊີວິດເປັນຂອງໜ້ອຍດ້ວຍເຫດ ໒ ປະການ

ຄຳວ່າ ຊີວິດ ໃນຄຳວ່າ ຊີວິດນີ້ໜ້ອຍດຽວ ອະທິບາຍວ່າ ອາຍຸ ຄວາມດຳຣົງຢູ່ ຄວາມດຳເນີນໄປ ຄວາມໃຫ້ຊີວິດດຳເນີນໄປ ຄວາມເຄື່ອນໄຫວ ຄວາມເປັນໄປ ຄວາມຮັກສາ ຄວາມເປັນຢູ່ ຊີວິຕິນຊີ

ອັນໜຶ່ງ ຊີວິດເປັນຂອງໜ້ອຍດ້ວຍເຫດ ໒ ປະການ ຄື

໑. ຊີວິດເປັນຂອງໜ້ອຍ ຍ້ອນດຳຣົງຢູ່ຊົ່ວເວລາພຽງເລັກໜ້ອຍ
໒. ຊີວິດເປັນຂອງໜ້ອຍ ຍ້ອນມີຄຸນຄ່າພຽງເລັກໜ້ອຍ

ຊີວິດເປັນຂອງໜ້ອຍ ຍ້ອນດຳຣົງຢູ່ຊົ່ວເວລາພຽງເລັກໜ້ອຍ ເປັນແນວໃດ?

ຄື ໃນຂະນະຈິດທີ່ເປັນອະດີດ ຊີວິດເປັນຢູ່ແລ້ວ ບໍ່ແມ່ນກຳລັງເປັນຢູ່ ບໍ່ແມ່ນຈັກເປັນຢູ່ ໃນຂະນະຈິດທີ່ເປັນອະນາຄົດ ຊີວິດຈັກເປັນຢູ່ ບໍ່ແມ່ນກຳລັງເປັນຢູ່ ບໍ່ແມ່ນເປັນຢູ່ແລ້ວໃນຂະນະຈິດທີ່ເປັນປັດຈຸບັນ ຊີວິດກຳລັງເປັນຢູ່ ບໍ່ແມ່ນເປັນຢູ່ແລ້ວ ບໍ່ແມ່ນຈັກເປັນຢູ່

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ຊີວິດ ອັດຕະພາບ ສຸກແລະທຸກທັງປວງ
ເປັນທຳທີ່ປະກອບກັນຂຶ້ນຊົ່ວຂະນະຈິດດຽວ
ຂະນະຍ່ອມໝຸນໄປຢ່າງວ່ອງໄວ
ເທວະດາຜູ້ດຳຣົງຢູ່ໄດ້ ໘໔,໐໐໐ ກັບ
ກໍບໍ່ໄດ້ປະກອບດ້ວຍຈິດ ໒ ດວງ (ໃນຂະນະຈິດດຽວ) ເປັນຢູ່ໄດ້

ຂັນເຫຼົ່າໃດຂອງສັດທີ່ຕາຍໄປ ຫຼື
ຍັງດຳຣົງຢູ່ໃນໂລກນີ້ດັບໄປແລ້ວ
ຂັນເຫຼົ່ານັ້ນທັງໝົດ ເປັນແນວດຽວກັນ ດັບໄປແລ້ວກໍບໍ່ໄດ້ສືບຕໍ່ກັນ
ຂັນທີ່ແຕກໄປໃນອະດີດອັນຫາລຳດັບບໍ່ໄດ້
ແລະຂັນທີ່ຈະແຕກໄປໃນອະນາຄົດ
ມີລັກສະນະບໍ່ຕ່າງກັບຂັນທີ່ດັບໃນປັດຈຸບັນ
ສັດບໍ່ເກີດດ້ວຍອະນາຄົດຂັນ ຍ່ອມດຳຣົງຢູ່ດ້ວຍປັດຈຸບັນຂັນ
ຍ້ອນຈິດແຕກດັບໄປ ສັດໂລກຊື່ວ່າ ຕາຍແລ້ວ
ນີ້ເປັນປະຣະມັດຖະບັນຍັດ
ຍ້ອນມີອາຍະຕະນະ ໖ ເປັນປັດໄຈ
ຂັນທັງຫຼາຍທີ່ປ່ຽນໄປຕາມສັນທະ ຍ່ອມເປັນໄປບໍ່ຂາດສາຍ
ເໝືອນນ້ຳໄຫຼໄປຕາມທີ່ລຸ່ມ ສັນນັ້ນ
ຂັນທັງຫຼາຍເຖິງການຊຶງຕົວຢູ່ບໍ່ໄດ້ແຕກໄປແລ້ວ
ກອງຂັນໃນອະນາຄົດກໍບໍ່ມີ ສ່ວນຂັນທີ່ເກີດແລ້ວໃນປັດຈຸບັນກໍດຳຣົງຢູ່
ເໝືອນເມັດຜັກກາດເທິງປາຍເຫຼັກແຫຼມ ຢ່າງນັ້ນ
ຄວາມແຕກທຳລາຍແຫ່ງຂັນທັງຫຼາຍທີ່ເກີດຂຶ້ນເຫຼົ່ານັ້ນ
ຜາກົດຢູ່ຂ້າງໜ້າ ຂັນທັງຫຼາຍທີ່ມີການແຕກເປັນທຳມະດາ
ດຳຣົງຢູ່ ບໍ່ໄດ້ລວມກັບຂັນເກົ່າ
ຂັນທັງຫຼາຍມາໂດຍສະພາວະທີ່ບໍ່ຜາກົດ ແຕກທຳລາຍໄປແລ້ວ
ກໍໄປສູ່ສະພາວະທີ່ບໍ່ຜາກົດ ຍ່ອມເກີດຂຶ້ນແລະດັບໄປ
ເໝືອນສາຍຟ້າແມບໃນອາກາດ ສັນນັ້ນ

ຊີວິດຊື່ວ່າ ເປັນຂອງໜ້ອຍ ຍ້ອນດຳຣົງຢູ່ຊົ່ວເວລາພຽງເລັກໜ້ອຍ ເປັນແນວນີ້

ຊີວິດເປັນຂອງໜ້ອຍ ຍ້ອນມີຄຸນຄ່າພຽງເລັກໜ້ອຍ ເປັນແນວໃດ?

ຄື ຊີວິດກ່ຽວເນື່ອງດ້ວຍລົມຫັນໃຈເຂົ້າ ຊີວິດກ່ຽວເນື່ອງດ້ວຍລົມຫັນໃຈອອກ ຊີວິດກ່ຽວເນື່ອງດ້ວຍລົມຫັນໃຈເຂົ້າແລະລົມຫັນໃຈອອກ ຊີວິດກ່ຽວເນື່ອງດ້ວຍມະຫາພູຕະຣູບ ຊີວິດກ່ຽວເນື່ອງດ້ວຍອາຫານທີ່ກືນກິນ ຊີວິດກ່ຽວເນື່ອງດ້ວຍໄຟທາດ ຊີວິດກ່ຽວເນື່ອງດ້ວຍວິນຍານ ມູນເຫດ (ກະຣັດຊະກາຍ) ຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ບຸບພະເຫດຂອງ ສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ປັດໄຈທັງຫຼາຍມີອາລົມເປັນຕົ້ນມີກຳລັງໜ້ອຍ ແດນເກີດ (ຕັນຫາ) ມີກຳລັງໜ້ອຍ ທຳທີ່ເກີດຮ່ວມກັນຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍທຳທີ່ປະກອບກັນ (ອະຣູບປະທຳ) ຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ທຳທີ່ເກີດພ້ອມກັນຂອງສະພາວະທຳເຫຼົ່ານີ້ມີກຳລັງໜ້ອຍ ກິເລດເຄື່ອງປະກອບ (ຕັນຫາ) ມີກຳລັງໜ້ອຍ ສະພາວະທຳເຫຼົ່ານີ້ແຕ່ລະຢ່າງມີ

ກຳລັງໜ້ອຍຕະຫຼອດເວລາ ສະພາວະທຳເຫຼົ່ານີ້ແຕ່ລະຢ່າງບໍ່ໝັ້ນຄົງ ສະພາວະທຳເຫຼົ່ານີ້ຕ່າງກໍເຮັດໃຫ້ສະພາວະທຳອື່ນຕົກລ່ວງລົງໄປ ຍ້ອນສະພາວະທຳເຫຼົ່ານີ້ຕ່າງກໍບໍ່ມີຄວາມຕ້ານທານ ສະພາວະທຳເຫຼົ່ານີ້ຕ່າງກໍບໍ່ດຳຣົງກັນແລະກັນຢູ່ໄດ້ ແມ່ນສະພາວະທຳທີ່ເຮັດໃຫ້ທຳເຫຼົ່ານີ້ເກີດກໍບໍ່ມີ

ອັນໜຶ່ງ ທຳໃດ ໆ ກໍບໍ່ໄດ້ເສື່ອມໄປຍ້ອນທຳໃດ ໆ
ຍ້ອນຂັນເຫຼົ່ານີ້ ເພິ່ງເຖິງຄວາມແຕກດັບໄປໂດຍປະການທັງປວງ
ຂັນເຫຼົ່ານີ້ທີ່ເກີດຂຶ້ນຍ້ອນເຫດປັດໄຈກ່ອນ
ແມ່ນເຫດປັດໄຈທີ່ເກີດກ່ອນກໍແຕກດັບໄປແລ້ວ ໃນກ່ອນ
ໃນການໃດ ໆ ຂັນທີ່ເກີດກ່ອນແລະທີ່ເກີດພາຍຫຼັງ
ຈຶ່ງບໍ່ໄດ້ເຫັນກັນແລະກັນ

ຊີວິດຊື່ວ່າເປັນຂອງໜ້ອຍ ຍ້ອນມີຄຸນຄ່າພຽງເລັກໜ້ອຍ ເປັນແນວນີ້

ອັນໜຶ່ງ ຍ້ອນທຽບກັບຊີວິດຂອງເທວະດາຊັ້ນຈາຕຸມະຫາຣາດ ຊີວິດຂອງມະນຸດຈຶ່ງໜ້ອຍ ຄື ເລັກໜ້ອຍ ບໍ່ຫຼາຍ ຊົ່ວຂະນະ ທັນທີ ບຶດດຽວ ຕັ້ງຢູ່ບໍ່ດົນ ດຳຣົງຢູ່ບໍ່ດົນ ຍ້ອນທຽບກັບຊີວິດຂອງເທວະດາຊັ້ນດາວະດຶງສາ ຯລຯ ເທວະດາຊັ້ນຍາມາ ຯລຯ ເທວະດາຊັ້ນດຸສິດ ຯລຯ ເທວະດາຊັ້ນນິມມານະຣະດີ ຯລຯ ເທວະດາຊັ້ນປະຣະນິມມິດຕະວະສະວັດດີ ຯລຯ ຍ້ອນທຽບຄຽງກັບຊີວິດຂອງເທວະດາຊັ້ນພົມກາຍິກາ (ຜູ້ນັບເນື່ອງຢູ່ໃນໝູ່ພົມ) ຊີວິດຂອງມະນຸດຈຶ່ງໜ້ອຍ ຄື ເລັກໜ້ອຍ ບໍ່ຫຼາຍ ຊົ່ວຂະນະ ທັນທີ ບຶດດຽວ ຕັ້ງຢູ່ບໍ່ດົນ ດຳຣົງຢູ່ບໍ່ດົນ

ສົມຈິງ ດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ອາຍຸຂອງມະນຸດໜ້ອຍ ຈຳຕ້ອງໄປສູ່ປະຣະໂລກ ຕ້ອງປະສົບກັບຄວາມຕາຍທີ່ເຂົ້າໃຈກັນຢູ່ ຄວນທຳກຸສົນ ປະພຶດພົມມະຈັນ ຜູ້ທີ່ເກີດມາແລ້ວບໍ່ຕາຍບໍ່ມີ ພິກຂຸທັງຫຼາຍ ຜູ້ໃດມີຊີວິດຍືນຍາວ ຜູ້ນັ້ນກໍຢູ່ໄດ້ພຽງ ແຕ່ ໑໐໐ ປີ ຫຼື ຢູ່ໄດ້ເກີນກວ່ານັ້ນກໍມີໜ້ອຍ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງຕັດຄາຖາປະພັນຕໍ່ໄປອີກວ່າ)

ມະນຸດມີອາຍຸໜ້ອຍ ບຸກຄົນຜູ້ສະຫຼາດເພິ່ງດູໝິ່ນຊີວິດທີ່ໜ້ອຍນັ້ນ
ເພິ່ງເລັ່ງປະພຶດທຳເໝືອນຄົນຖືກໄຟໄໝ້ຫົວຢູ່
ຍ້ອນຄວາມຕາຍຈະບໍ່ມາຮອດບໍ່ມີ
ວັນຄືນລ່ວງເລີຍໄປ ຊີວິດກໍໃກ້ໝົດສິ້ນໄປ
ອາຍຸຂອງສັດທັງຫຼາຍກໍໝົດສິ້ນໄປ
ເໝືອນນ້ຳໃນແມ່ນ້ຳນ້ອຍຈະຕ້ອງແຫ້ງໄປ

ລວມຄວາມວ່າ ຊີວິດນີ້ໜ້ອຍດຽວ

ຄຳວ່າ ມະນຸດຍ່ອມຕາຍພາຍໃນ ໑໐໐ ປີ ອະທິບາຍວ່າ ມະນຸດຍ່ອມເຄື່ອນ ຕາຍ ສູນຫາຍ ສະຫຼາຍໄປ ໃນຂະນະທີ່ເປັນກະລະລະ (ນ້ຳໃສ) ແດ່ ໆລໆ ໃນຂະນະທີ່ເປັນອັບພຸທະ (ນ້ຳລ້າງຊີ້ນ) ແດ່ ໆລໆ ໃນຂະນະທີ່ເປັນເປສີ (ຕ່ອນຊີ້ນ) ແດ່ ໆລໆ ໃນຂະນະທີ່ເປັນຄະນະ (ກ້ອນຊີ້ນ) ແດ່ ໆລໆ ໃນຂະນະທີ່ເປັນປັນຈະສາຂາ (໕ ປຸ່ມ ຄືມີ ໒ ຂາ ໒ ຫົວ ໑) ແດ່ ຂະນະເກີດ ຍ່ອມເຄື່ອນ ຕາຍ ສູນຫາຍ ສະຫຼາຍໄປແດ່ ຍ່ອມເຄື່ອນ ຕາຍ ສູນຫາຍ ສະຫຼາຍໄປ ໃນເຮືອນເກີດແດ່ ມີອາຍຸພຽງເຄິ່ງເດືອນ ຍ່ອມເຄື່ອນ ຕາຍ ສູນຫາຍ ສະຫຼາຍໄປແດ່ ມີອາຍຸ ໑ ເດືອນ ໆລໆ ມີອາຍຸ ໒ ເດືອນ ໆລໆ ມີອາຍຸ ໓ ເດືອນ ໆລໆ ມີອາຍຸ ໔ ເດືອນ ໆລໆ ມີອາຍຸ ໕ ເດືອນ ໆລໆ ມີອາຍຸ ໖ ເດືອນ ໆລໆ ມີອາຍຸ ໗ ເດືອນ ໆລໆ ມີອາຍຸ ໘ ເດືອນ ໆລໆ ມີອາຍຸ ໙ ເດືອນ ໆລໆ ມີອາຍຸ ໑໐ ເດືອນ ໆລໆ ມີອາຍຸ ໑ ປີ ໆລໆ ມີອາຍຸ ໒ ປີ ໆລໆ ມີອາຍຸ ໓ ປີ ໆລໆ ມີອາຍຸ ໔ ປີ ໆລໆ ມີອາຍຸ ໕ ປີ ໆລໆ ມີອາຍຸ ໖ ປີ ໆລໆ ມີອາຍຸ ໗ ປີ ໆລໆ ມີອາຍຸ ໘ ປີ ໆລໆ ມີອາຍຸ ໙ ປີ ໆລໆ ມີອາຍຸ ໑໐ ປີ ໆລໆ ມີອາຍຸ ໒໐ ປີ ໆລໆ ມີອາຍຸ ໓໐ ປີ ໆລໆ ມີອາຍຸ ໔໐ ປີ ໆລໆ ມີອາຍຸ ໕໐ ປີ ໆລໆ ມີອາຍຸ ໖໐ ປີ ໆລໆ ມີອາຍຸ ໗໐ ປີ ໆລໆ ມີອາຍຸ ໘໐ ປີ ໆລໆ ມີອາຍຸ ໙໐ ປີ ຍ່ອມເຄື່ອນ ຕາຍ ສູນຫາຍ ສະຫຼາຍໄປ ລວມຄວາມວ່າ ມະນຸດຍ່ອມຕາຍພາຍໃນ ໑໐໐ ປີ

ຄຳວ່າ ແມ່ນຫາກຜູ້ໃດຈະມີຊີວິດຢູ່ເກີນໄປກວ່ານັ້ນ ອະທິບາຍວ່າ ຜູ້ໃດຢູ່ໄດ້ເກີນ ໑໐໐ ປີ ຜູ້ນັ້ນກໍຢູ່ໄດ້ອີກ ໑ ປີແດ່ ໆລໆ ໒ ປີແດ່ ໆລໆ ໓ ປີແດ່ ໆລໆ ໔ ປີແດ່ ໆລໆ ໕ ປີແດ່ ໆລໆ ໒໐ ປີແດ່ ໆລໆ ໓໐ ປີແດ່ ໆລໆ ຜູ້ນັ້ນກໍຢູ່ໄດ້ອີກ ໔໐ ປີແດ່ ລວມຄວາມວ່າ ແມ່ນຫາກຜູ້ໃດຈະມີຊີວິດຢູ່ເກີນໄປກວ່ານັ້ນ

ຄຳວ່າ ຜູ້ນັ້ນກໍຈະຕາຍຍ້ອນຊະຣາຢ່າງແນ່ນອນ ອະທິບາຍວ່າ ເມື່ອຜູ້ໃດຊະຣາ ຄື ສູງອາຍຸ ເປັນຜູ້ເຖົ້າ ລ່ວງການມາຫຼາຍ ຜ່ານໄວມາຫຼາຍ ມີແຂ້ວຫັກ ຜົມຫງອກ ຜົມບາງ ຫົວລ້ານ ໜັງຍານ ຕົວຕົກກະ ຫຼັງໂກ່ງ ຫຼັງຄ່ອມ ຖືໄມ້ການເທົ້າຍັນກາຍ ຜູ້ນັ້ນກໍຍ່ອມເຄື່ອນ ຕາຍ ສູນຫາຍ ສະຫຼາຍໄປຍ້ອນຊະຣາ ບໍ່ມີຄວາມຫຼຸດພົ້ນຈາກຄວາມຕາຍໄປໄດ້

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ສັດທີ່ເກີດມາແລ້ວ ມີໄພຈາກຄວາມຕາຍເປັນນິດ
ເໝືອນໝາກໄມ້ສຸກແລ້ວ ມີໄພຈາກການຫຼົ່ນໄປໃນເວລາເຊົ້າ
ພາຊະນະດິນທີ່ຊ່າງໝໍ້ເຮັດໄວ້ທັງໝົດມີຄວາມແຕກເປັນທີ່ສຸດ ສັນໃດ
ຊີວິດຂອງສັດທັງຫຼາຍກໍເປັນສັນນັ້ນ
ມະນຸດທັງເດັກ ຜູ້ໃຫຍ່ ໂງ່ ແລະສະຫຼາດທັງໝົດ
ຍ່ອມໄປສູ່ອຳນາດຂອງຄວາມຕາຍ ມີຄວາມຕາຍຖ້າຢູ່ຂ້າງໜ້າ

ເມື່ອມະນຸດເຫຼົ່ານັ້ນຜູ້ຖືກຄວາມຕາຍຄອບງຳຢູ່
ກຳລັງຈະໄປຈາກໂລກນີ້ສູ່ປະຣະໂລກ ບິດາກໍປົກປ້ອງບຸດນັ້ນບໍ່ໄດ້
ຫຼືໝູ່ຍາດກໍປົກປ້ອງໝູ່ຍາດບໍ່ໄດ້
ເມື່ອພວກຍາດກຳລັງເພ່ງແນມເບິ່ງຢູ່
ພາກັນຮ້ອງໄຫ້ຈົ່ມວ່າ ຈົ່ງເບິ່ງເຖີດຜູ້ນີ້
ຖືກຄວາມຕາຍນຳໄປແລ້ວ ເໝືອນງົວ ຖືກນຳໄປຂ້າ
ສັດໂລກຖືກຄວາມແກ່ແລະຄວາມຕາຍຄອບງຳຢູ່ແນວນີ້

ລວມຄວາມວ່າ ຜູ້ນັ້ນກໍຈະຕາຍຍ້ອນຊະຣາແນ່ແທ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະ ພາກເຈົ້າຈຶ່ງຕັດວ່າ

ຊີວິດນີ້ໜ້ອຍດຽວ ມະນຸດຍ່ອມຕາຍພາຍໃນ ໑໐໐ ປີ
ແມ່ນຫາກຜູ້ໃດຈະມີຊີວິດຢູ່ເກີນໄປກວ່ານັ້ນ
ຜູ້ນັ້ນກໍຈະຕາຍຍ້ອນຊະຣາຢ່າງແນ່ນອນ

[໔໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຊົນທັງຫຼາຍ ຍ່ອມເສົ້າໂສກຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ
ຍ້ອນຄວາມຍຶດຖືທີ່ທ່ຽງແທ້ບໍ່ມີຢູ່
ຄວາມພັດພາກຈາກກັນນີ້ ເປັນສິ່ງທີ່ມີຢູ່ຈິງແທ້
ກຸນລະບຸດເຫັນດັ່ງນີ້ແລ້ວ ກໍບໍ່ເພິ່ງຢູ່ຄອງເຮືອນ

## ວ່າດ້ວຍຄົນເສົ້າໂສກຍ້ອນການຍຶດຖື

ຄຳວ່າ ຊົນທັງຫຼາຍ ໃນຄຳວ່າ ຊົນທັງຫຼາຍ ຍ່ອມເສົ້າໂສກຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ກະສັດ ພາມ ແພດ ສູດ ບັນພະຊິດ ເທວະດາ ແລະມະນຸດທັງຫຼາຍ

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ

ຊົນທັງຫຼາຍຜູ້ຫວາດຣະແວງວ່າວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ຈັກຖືກຍາດຊິງໄປ ຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນກຳລັງຖືກຍາດຊິງໄປ ຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນຖືກ ແຍ່ງຊິງໄປແລ້ວ ຍ່ອມເສົ້າໂສກແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າ ວັດຖຸທີ່ຕົນຍຶດຖືວ່າ ເປັນຂອງເຮົາ

ຈັກຜັນປ່ຽນໄປ ຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນກຳລັງຜັນປ່ຽນໄປ ຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນຜັນປ່ຽນໄປແລ້ວ ຍ່ອມເສົ້າໂສກແດ່ ຄື ລຳບາກໃຈ ຄ່ຳຄວນ ຕີເອິກ ພ່ຳເພີ້ ເຖິງຄວາມຫຼົງໃຫຼ ລວມຄວາມວ່າ ຊົນທັງຫຼາຍ ຍ່ອມເສົ້າໂສກຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ

ຄຳວ່າ ຄວາມຍຶດຖື ໃນຄຳວ່າ ຍ້ອນຄວາມຍຶດຖືທີ່ທ່ຽງແທ້ບໍ່ມີຢູ່ ໄດ້ແກ່ ຄວາມຍຶດຖື ໒ ຢ່າງ ຄື (໑) ຄວາມຍຶດຖືດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດທິດຖິ

ຄວາມຍຶດຖືດ້ວຍອຳນາດຕັນຫາ ເປັນພາວະບໍ່ທ່ຽງ ອັນປັດໄຈປຸງແຕ່ງຂຶ້ນ ອາໄສ ກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ມີຄວາມຜັນປ່ຽນໄປເປັນທຳມະດາ

ແມ່ນຄວາມຍຶດຖືດ້ວຍອຳນາດທິດຖິ ກໍເປັນພາວະບໍ່ທ່ຽງ ອັນປັດໄຈປຸງແຕ່ງຂຶ້ນ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ມີຄວາມຜັນປ່ຽນໄປເປັນທຳມະດາ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພິກຂຸທັງຫຼາຍ ພວກທ່ານເຫັນຄວາມຍຶດຖື ທີ່ເປັນຂອງທ່ຽງ ໝັ້ນຄົງ ແນ່ນອນ ມີຄວາມບໍ່ຜັນປ່ຽນໄປເປັນທຳມະດາ ຈັກຕັ້ງຢູ່ຢ່າງນັ້ນສະເໝີກັບສິ່ງທີ່ຍຶດຖືວ່າແນ່ແທ້ຫຼືບໍ່?

ບໍ່ເຫັນ ຂ້ານ້ອຍ

ດີແລ້ວ ພິກຂຸທັງຫຼາຍ ແມ່ນເຮົາກໍບໍ່ພິຈາລະນາເຫັນຄວາມຍຶດຖືທີ່ເປັນຂອງທ່ຽງ ໝັ້ນຄົງ ແນ່ນອນ ມີຄວາມບໍ່ຜັນປ່ຽນໄປເປັນທຳມະດາ ຈັກຕັ້ງຢູ່ຢ່າງນັ້ນສະເໝີກັບສິ່ງທີ່ຍຶດຖືວ່າ ແນ່ນອນ

ຄວາມຍຶດຖື ທີ່ເປັນຂອງທ່ຽງ ໝັ້ນຄົງ ແນ່ນອນ ມີຄວາມບໍ່ຜັນປ່ຽນໄປເປັນທຳມະດາ ຍ່ອມບໍ່ມີ ບໍ່ມີຢູ່ ຄື ບໍ່ຜາກົດ ຫາບໍ່ໄດ້ ລວມຄວາມວ່າ ຍ້ອນຄວາມຍຶດຖືທີ່ທ່ຽງແທ້ບໍ່ມີຢູ່

ຄຳວ່າ ຄວາມພັດພາກຈາກກັນນີ້ ເປັນສິ່ງທີ່ມີຢູ່ຈິງ ອະທິບາຍວ່າ ຄວາມເປັນຕ່າງ ໆ ຄວາມພັດພາກ ຄວາມເປັນຢ່າງອື່ນ ມີຢູ່ ຜາກົດ ຫາໄດ້ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພໍເທີ້ນອານົນ ທ່ານຢ່າເສົ້າໂສກ ຢ່າຮ່ຳໄຮເລີຍ ເຮົາເວົ້າໄວ້ກ່ອນແລ້ວບໍ່ແມ່ນບໍວ່າ ຄວາມເປັນຕ່າງ ໆ ຄວາມພັດພາກ ຄວາມເປັນຢ່າງອື່ນຈາກສິ່ງທີ່ຮັກແພງ ພໍໃຈທັງໝົດ ມີຢູ່ ອານົນ ສິ່ງທີ່ເກີດແລ້ວ ອັນປັດໄຈປຸງແຕ່ງຂຶ້ນແລ້ວ ຈະຕ້ອງແຕກສະຫຼາຍໄປເປັນທຳມະດາ ຂໍຢ່າໄດ້ແຕກສະຫຼາຍໄປເລີຍ ຈະເພິ່ງຫາໄດ້ຈາກທີ່ໃດໃນໂລກນີ້ນໍ ຂໍ້ນັ້ນ ບໍ່ແມ່ນຖານະຈະມີໄດ້ ຂັນ ທາດ ອາຍະຕະນະກ່ອນ ໆ ຜັນປ່ຽນເປັນອື່ນໄປ ຂັນ ທາດ ອາຍະຕະນະທີ່ເກີດຫຼັງ ໆ ກໍຍ່ອມເປັນໄປ ລວມຄວາມວ່າ ຄວາມພັດພາກຈາກກັນນີ້ ເປັນສິ່ງທີ່ມີຢູ່ຈິງ

ຄຳວ່າ ດັ່ງນີ້ ໃນຄຳວ່າ ກຸນລະບຸດເຫັນດັ່ງນີ້ແລ້ວກໍບໍ່ເພິ່ງຄອງເຮືອນ ເປັນບົດສົນທິ ເປັນຄຳເຊື່ອມບົດ ເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ດັ່ງນີ້ ນີ້ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ເຫັນດັ່ງນີ້ແລ້ວ ໄດ້ແກ່ ເຫັນແລ້ວ ຄື ເບິ່ງເຫັນແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ ຍ້ອນວັດຖຸທີ່ຢຶດຖືວ່າເປັນຂອງເຮົາ ດັ່ງນີ້ ລວມຄວາມວ່າ ເຫັນດັ່ງນີ້ແລ້ວ

ຄຳວ່າ ກໍບໍ່ເພິ່ງຄອງເຮືອນ ອະທິບາຍວ່າ ເພິ່ງຕັດຄວາມກັງວົນເລື້ອງການຄອງເຮືອນ ຕັດຄວາມກັງວົນເລື້ອງບຸດພັນລະຍາ ຕັດຄວາມກັງວົນເລື້ອງຍາດ ຕັດຄວາມກັງວົນເລື້ອງມິດອຳມາດ ຕັດຄວາມກັງວົນເລື້ອງການສະສົມທັງໝົດ ແຖຜົມແລະໜວດແລ້ວ ນຸ່ງຫົ່ມຜ້າ ກາສາວະ ອອກຈາກເຮືອນບວດເປັນບັນພະຊິດ ເຂົ້າເຖິງຄວາມບໍ່ກັງວົນແລ້ວ ທ່ຽວໄປຢູ່ ເຄື່ອນໄຫວເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ລວມຄວາມວ່າ ກຸນລະບຸດເຫັນດັ່ງນີ້ແລ້ວ ກໍບໍ່ເພິ່ງຄອງເຮືອນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຊົນທັງຫຼາຍ ຍ່ອມເສົ້າໂສກຍ້ອນວັດຖຸທີ່ຢຶດຖືວ່າເປັນຂອງເຮົາ
ຍ້ອນຄວາມຢຶດຖືທີ່ທ່ຽງແທ້ບໍ່ມີຢູ່
ຄວາມພັດພາກຈາກກັນນີ້ ເປັນສິ່ງທີ່ມີຢູ່ຈິງແທ້
ກຸນລະບຸດເຫັນດັ່ງນີ້ແລ້ວ ກໍບໍ່ເພິ່ງຢູ່ຄອງເຮືອນ

[໘໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸຣຸດຍ່ອມສຳຄັນປັນຈະຂັນໃດວ່າ ນີ້ຂອງເຮົາ
ປັນຈະຂັນນັ້ນບຸຣຸດນັ້ນຍ່ອມລະໄປຍ້ອນຄວາມຕາຍ
ບັນດິດຜູ້ເປັນພຸດທະມາມະກະ ຮູ້ແຈ້ງໂທດນີ້ແລ້ວ
ບໍ່ເພິ່ງນ້ອມໄປເພື່ອຄວາມຢຶດຖືວ່າເປັນຂອງເຮົາ
ວ່າດ້ວຍການຢຶດຖືປັນຈະຂັນ

ຄຳວ່າ ປັນຈະຂັນນັ້ນບຸຣຸດນັ້ນຍ່ອມລະໄປຍ້ອນຄວາມຕາຍ ອະທິບາຍວ່າ

ຄຳວ່າ ຄວາມຕາຍ ໄດ້ແກ່ ການຈຸຕິ ການເຄື່ອນຈາກໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ຄວາມທຳລາຍ ຄວາມຫາຍໄປ ມັດຈຸ ຄວາມຕາຍ ກາລະກິຣິຍາ ການທຳລາຍຂັນ ການປະຖິ້ມຊາກສົບໄວ້ ການຕັດຂາດຊີວິຕິນຊີ

ຄຳວ່າ ປັນຈະຂັນນັ້ນ ໄດ້ແກ່ ຮູບ ເວທະນາ ສັນຍາ ສັງຂານ ວິນຍານ

ຄຳວ່າ ຍ່ອມລະໄປ ໄດ້ແກ່ ປັນຈະຂັນນັ້ນບຸຣຸດນັ້ນຍ່ອມລະໄປ ຄື ລະຖິ້ມ ລະຂາດ ສູນຫາຍ ສະຫຼາຍໄປ ສົມຈິງດັ່ງພາສິດນີ້ວ່າ

ໂພຄະຊັບຍ່ອມລະບຸກຄົນໄປກ່ອນແດ່
ບຸກຄົນຍ່ອມລະໂພຄະຊັບໄປກ່ອນແດ່
ໂຈນຣາຊາຜູ້ຕ້ອງການກາມ ໝູ່ຊົນຜູ້ມີໂພຄະຊັບ ເປັນຜູ້ບໍ່ທ່ຽງ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ເສົ້າໂສກໃນເວລາເສົ້າໂສກ
ດວງຈັນຂຶ້ນເຕັມດວງແລ້ວກໍລັບໄປ
ດວງອາທິດກຳຈັດຄວາມມືດແລ້ວກໍລັບໄປ
ສັດຕູເອີຍ ເຮົາຮູ້ຈັກໂລກກະທຳແລ້ວ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ເສົ້າໂສກໃນເວລາເສົ້າໂສກ

ຄຳວ່າ ປັນຈະຂັນໃດ ໃນຄຳວ່າ ບຸຣຸດຍ່ອມສຳຄັນປັນຈະຂັນໃດວ່າ ນີ້ຂອງເຮົາ ປັນຈະຂັນນັ້ນ ບຸຣຸດນັ້ນຍ່ອມລະໄປຍ້ອນຄວາມຕາຍ ໄດ້ແກ່ ຮູບ ເວທະນາ ສັນຍາ ສັງ ຂານ ວິນຍານ

ຄຳວ່າ ບຸຣຸດ ໄດ້ແກ່ ການກ່າວເຖິງ ການຂະໜານນາມ ການບັນຍັດ ຊື່ທີ່ຮຽກກັນ ຊື່ການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະ

ຄຳວ່າ ຍ່ອມສຳຄັນປັນຈະຂັນໃດວ່າ ນີ້ຂອງເຮົາ ອະທິບາຍວ່າ ຍ່ອມສຳຄັນຍ້ອນຄວາມສຳຄັນດ້ວຍອຳນາດຕັນຫາ ຍ່ອມສຳຄັນຍ້ອນຄວາມສຳຄັນດ້ວຍອຳນາດທິດຖິ ຍ່ອມສຳຄັນຍ້ອນຄວາມສຳຄັນດ້ວຍອຳນາດມານະ ຍ່ອມສຳຄັນຍ້ອນຄວາມສຳຄັນດ້ວຍອຳນາດກິເລດ ຍ່ອມສຳຄັນຍ້ອນຄວາມສຳຄັນດ້ວຍອຳນາດທຸດຈະຣິດ ຍ່ອມສຳຄັນຍ້ອນຄວາມສຳຄັນດ້ວຍອຳນາດກິເລດເຄື່ອງປະກອບ ຍ່ອມສຳຄັນຍ້ອນຄວາມສຳຄັນດ້ວຍອຳນາດວິບາກ ລວມຄວາມວ່າ ບຸຣຸດຍ່ອມສຳຄັນປັນຈະຂັນໃດວ່າ ນີ້ຂອງເຮົາ

ຄຳວ່າ ບັນດິດ ຯລຯ ຮູ້ແຈ້ງໂທດນີ້ແລ້ວ ໄດ້ແກ່ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງໂທດນີ້ ໃນປັນຈະຂັນທີ່ຍຶດຖືວ່າເປັນຂອງເຮົາ ລວມຄວາມວ່າ ຮູ້ແຈ້ງໂທດນີ້ແລ້ວ

ຄຳວ່າ ບັນດິດ ໄດ້ແກ່ ນັກປາດ ບັນດິດ ຜູ້ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ບັນດິດ ຯລຯ ຮູ້ແຈ້ງໂທດນີ້ແລ້ວ

ຄຳວ່າ ຜູ້ເປັນພຸດທະມາມະກະ ຯລຯ ບໍ່ເພິ່ງນ້ອມໄປເພື່ອຄວາມຍຶດຖືວ່າເປັນຂອງເຮົາ ອະທິບາຍວ່າ

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາ ດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ°

ຄຳວ່າ ຜູ້ເປັນພຸດທະມາມະກະ ໄດ້ແກ່ ຜູ້ນັບຖືພຣະພຸດທະເຈົ້າ ພຣະທຳ ພຣະສົງ ຜູ້ນັ້ນຍ່ອມນັບຖືພຣະຜູ້ມີພຣະພາກເຈົ້າວ່າເປັນຂອງເຮົາ ພຣະຜູ້ມີພຣະພາກເຈົ້າກໍຊົງຮັບຮອງບຸກຄົນນັ້ນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດເປັນຄົນ ຄົດໂກງ ແຂງກະດ້າງ ເວົ້າໂລເລ ວາງໂຕ ມີມານະຈັດ ມີຈິດບໍ່ໝັ້ນຄົງ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ບໍ່ແມ່ນຜູ້ນັບຖືເຮົາ ເປັນຜູ້ໄປຈາກທຳວິໄນນີ້ແລ້ວ ແລະພິກຂຸເຫຼົ່ານັ້ນຈະບໍ່ເຖິງຄວາມຈະເລີນງອກງາມ ໄພບູນໃນທຳວິໄນນີ້ ສ່ວນພິກຂຸເຫຼົ່າໃດ ບໍ່ຄົດໂກງ ບໍ່ເວົ້າໂລເລ ເປັນນັກປາດ ບໍ່ແຂງກະດ້າງ ມີຈິດໝັ້ນຄົງ ພິກຂຸເຫຼົ່ານັ້ນ ເປັນຜູ້ນັບຖືເຮົາ ເປັນຜູ້ບໍ່ໄປຈາກທຳວິໄນນີ້ ແລະພິກຂຸເຫຼົ່ານັ້ນຈະເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງຕັດຄາຖາປະພັນຕໍ່ໄປອີກວ່າ)

ພິກຂຸທັງຫຼາຍ ຜູ້ຄົດໂກງ ແຂງກະດ້າງ
ເວົ້າໂລເລ ວ່າງທ່າ ມີມານະຈັດ ມີຈິດບໍ່ໝັ້ນຄົງ
ຍ່ອມບໍ່ງອກງາມໃນທຳທີ່ພຣະສຳມາສຳພຸດທະເຈົ້າສະແດງແລ້ວ
(ສ່ວນ) ພິກຂຸທັງຫຼາຍ ຜູ້ບໍ່ຄົດໂກງ ບໍ່ເວົ້າໂລເລ
ເປັນນັກປາດ ບໍ່ແຂງກະດ້າງ ມີຈິດໝັ້ນຄົງ
ຍ່ອມງອກງາມໃນທຳທີ່ພຣະສຳມາສຳພຸດທະເຈົ້າສະແດງແລ້ວ

ຄຳວ່າ ຜູ້ເປັນພຸດທະມາມະກະ ຯລຯ ບໍ່ເພິ່ງນ້ອມໄປເພື່ອຄວາມຍຶດຖືວ່າເປັນຂອງເຮົາ ອະທິບາຍວ່າ ຜູ້ເປັນພຸດທະມາມະກະລະຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ເພິ່ງນ້ອມໄປ ຄື ບໍ່ເພິ່ງເອນໄປເພື່ອຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ບໍ່ເພິ່ງເປັນຜູ້ເອນໄປໃນຄວາມຍຶດຖືວ່າເປັນຂອງເຮົານັ້ນ ບໍ່ເພິ່ງເປັນຜູ້ໂອນໄປໃນຄວາມຍຶດຖືວ່າເປັນຂອງເຮົານັ້ນ ບໍ່ເພິ່ງເປັນຜູ້ເອນ ໄປໃນຄວາມຍຶດຖືວ່າເປັນຂອງເຮົານັ້ນ ບໍ່ເພິ່ງເປັນຜູ້ນ້ອມໃຈໄປໃນຄວາມຍຶດຖືວ່າເປັນຂອງ ເຮົານັ້ນ ບໍ່ເພິ່ງເປັນຜູ້ມີຄວາມຍຶດຖືວ່າເປັນຂອງເຮົານັ້ນເປັນໃຫຍ່ ລວມຄວາມວ່າ ຜູ້ເປັນພຸດທະມາມະກະ ຯລຯ ບໍ່ເພິ່ງນ້ອມໄປເພື່ອຄວາມຍຶດຖືວ່າເປັນຂອງເຮົາ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸຣຸດຍ່ອມສຳຄັນປັນຈະຂັນໃດວ່າ ນີ້ຂອງເຮົາ
ປັນຈະຂັນນັ້ນບຸຣຸດນັ້ນຍ່ອມລະໄປຍ້ອນຄວາມຕາຍ
ບັນດິດຜູ້ເປັນພຸດທະມາມະກະ ຮູ້ແຈ້ງໂທດນີ້ແລ້ວ
ບໍ່ເພິ່ງນ້ອມໄປເພື່ອຄວາມຍຶດຖືວ່າເປັນຂອງເຮົາ

[໔໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸຣຸດຜູ້ຕື່ນຂຶ້ນແລ້ວ ຍ່ອມບໍ່ເຫັນສິ່ງທີ່ກ່ຽວຂ້ອງດ້ວຍຄວາມຝັນ ສັນໃດ
ໃຜ ໆ ຍ່ອມບໍ່ເຫັນຊົນຜູ້ເປັນທີ່ຮັກ ເຊິ່ງຕາຍຈາກໄປແລ້ວ ສັນນັ້ນ

## ວ່າດ້ວຍສິ່ງທີ່ກ່ຽວຂ້ອງອຸປະມາເໝືອນຄວາມຝັນ

ຄຳວ່າ ສິ່ງທີ່ກ່ຽວຂ້ອງດ້ວຍຄວາມຝັນ ສັນໃດ ໄດ້ແກ່ ທີ່ກ່ຽວຂ້ອງ ຄື ທີ່ມາຜາກົດ ທີ່ມາໂຮມກັນ ທີ່ມາປະຊຸມກັນ ລວມຄວາມວ່າ ສິ່ງທີ່ກ່ຽວຂ້ອງດ້ວຍຄວາມຝັນ ສັນໃດ

ຄຳວ່າ ບຸຣຸດຜູ້ຕື່ນຂຶ້ນແລ້ວ ຍ່ອມບໍ່ເຫັນ ອະທິບາຍວ່າ ບຸຣຸດຜູ້ຝັນເຫັນດວງຈັນ ເຫັນດວງອາທິດ ເຫັນມະຫາສະມຸດ ເຫັນຂຸນເຂົາສຸເມຣຸ ເຫັນຊ້າງ ເຫັນມ້າ ເຫັນລົດ ເຫັນ ທະຫານຮາບ ເຫັນຂະບວນທັບ ເຫັນສວນທີ່ໜ້າອອນຊອນ ເຫັນປ່າທີ່ໜ້າອອນຊອນ ເຫັນພູມີພາກທີ່ໜ້າອອນຊອນ ເຫັນສະນ້ຳທີ່ໜ້າອອນຊອນ ເມື່ອຕື່ນຂຶ້ນແລ້ວກໍຍ່ອມບໍ່ເຫັນອັນໃດເລີຍ ສັນໃດ ລວມຄວາມວ່າ ບຸຣຸດຜູ້ຕື່ນຂຶ້ນແລ້ວ ຍ່ອມບໍ່ເຫັນ

ຄຳວ່າ ສັນນັ້ນ ໃນຄຳວ່າ ຊົນຜູ້ເປັນທີ່ຮັກ ຯລຯ ສັນນັ້ນ ເປັນຄຳອຸປະໄມເຮັດອຸປະມາໃຫ້ສົມບູນ

ຄຳວ່າ ຊົນຜູ້ເປັນທີ່ຮັກ ໄດ້ແກ່ ຊົນຜູ້ເປັນທີ່ຮັກ ຄື ຜູ້ນັບຖືວ່າເປັນຂອງເຮົາ ໄດ້ແກ່ ມານດາ ບິດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ບຸດ ທິດາ ມິດ ອຳມາດ ຫຼື ຍາດສາຍໂລຫິດ ລວມຄວາມວ່າ ຊົນຜູ້ເປັນທີ່ຮັກ ຯລຯ ສັນນັ້ນ

ຄຳວ່າ ຍ່ອມບໍ່ເຫັນ ຯລຯ ເຊິ່ງຕາຍຈາກໄປແລ້ວ ອະທິບາຍວ່າ ຜູ້ທີ່ຕາຍໄປແລ້ວ ຕັດຮຽກວ່າ ຜູ້ຈາກໄປແລ້ວ ໃຜ ໆ ຍ່ອມບໍ່ເຫັນ ຄື ຍ່ອມບໍ່ແນມເຫັນ ບໍ່ປະສົບ ບໍ່ພົບ ບໍ່ໄດ້ຄືນຊົນຜູ້ເປັນທີ່ຮັກເຊິ່ງຕາຍໄປແລ້ວ ລວມຄວາມວ່າ ຍ່ອມບໍ່ເຫັນ ຯລຯ ເຊິ່ງຕາຍຈາກໄປແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸຣຸດຜູ້ຕື່ນຂຶ້ນແລ້ວ ຍ່ອມບໍ່ເຫັນສິ່ງທີ່ກ່ຽວຂ້ອງດ້ວຍຄວາມຝັນ ສັນໃດ
ໃຜ ໆ ຍ່ອມບໍ່ເຫັນຄົນຜູ້ເປັນທີ່ຮັກ ເຊິ່ງຕາຍຈາກໄປແລ້ວ ສັນນັ້ນ

[໔໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຊື່ຂອງຊົນເຫຼົ່າໃດທີ່ກ່າວກັນຢູ່ນີ້
ຊົນເຫຼົ່ານັ້ນຍັງເຫັນກັນຢູ່ແດ່ ຍັງໄດ້ຍິນກັນຢູ່ແດ່
ສັດທີ່ເກີດຈາກໄປແລ້ວເຫຼືອໄວ້ແຕ່ຊື່ເທົ່ານັ້ນ ເພື່ອກ່າວຂານກັນ

## ວ່າດ້ວຍສິ່ງຕ່າງ ໆ ສະຫຼາຍໄປເຫຼືອໄວ້ແຕ່ຊື່

ຄຳວ່າ ຍັງເຫັນກັນຢູ່ ໃນຄຳວ່າ ຊົນເຫຼົ່ານັ້ນຍັງເຫັນກັນຢູ່ແດ່ ຍັງໄດ້ຍິນກັນຢູ່ແດ່ ໄດ້ແກ່ ຜູ້ມີຮູບທີ່ຮູ້ກັນໄດ້ດ້ວຍຈັກຂຸວິນຍານ

ຄຳວ່າ ຍັງໄດ້ຍິນກັນຢູ່ ໄດ້ແກ່ ຜູ້ມີຊື່ສຽງທີ່ຮູ້ກັນໄດ້ດ້ວຍໂສຕະວິນຍານ

ຄຳວ່າ ຊົນເຫຼົ່ານັ້ນ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ແລະມະນຸດ ລວມຄວາມວ່າ ຊົນເຫຼົ່ານັ້ນຍັງເຫັນກັນຢູ່ແດ່ ຍັງໄດ້ຍິນກັນຢູ່ແດ່

ຄຳວ່າ ຂອງຊົນເຫຼົ່າໃດ ໃນຄຳວ່າ ຊື່ຂອງຊົນເຫຼົ່າໃດທີ່ກ່າວກັນຢູ່ນີ້ ໄດ້ແກ່ ຂອງກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາແລະມະນຸດເຫຼົ່າໃດ

ຄຳວ່າ ຊື່ ໄດ້ແກ່ ການກ່າວເຖິງ ການຂະໜານນາມ ການບັນຍັດ ຊື່ທີ່ຮຽກກັນ ຊື່ ການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະ

ຄຳວ່າ ທີ່ກ່າວກັນຢູ່ ໄດ້ແກ່ ທີ່ຮຽກ ທີ່ກ່າວກັນຢູ່ ຄື ທີ່ເວົ້າ ທີ່ບອກ ທີ່ສະແດງ ທີ່ຊີ້ແຈ່ງກັນຢູ່ ລວມຄວາມວ່າ ຊື່ຂອງຊົນເຫຼົ່າໃດທີ່ກ່າວກັນຢູ່ນີ້

ຄຳວ່າ ເຫຼືອໄວ້ແຕ່ຊື່ເທົ່ານັ້ນ ເພື່ອກ່າວຂານກັນ ອະທິບາຍວ່າ ຂັນທີ່ເປັນຮູບ ເວທະນາ ສັນຍາ ສັງຂານ ວິນຍານ ບຸກຄົນຍ່ອມລະ ລະເວັ້ນ ລະຂາດ ສູນຫາຍ ສະຫຼາຍໄປ ກໍຍັງເຫຼືອໄວ້ແຕ່ຊື່ເທົ່ານັ້ນ

ຄຳວ່າ ເພື່ອກ່າວຂານກັນ ໄດ້ແກ່ ເພື່ອກ່າວຂານກັນ ຄື ເພື່ອເວົ້າ ບອກ ສະແດງ ຊີ້ແຈ່ງ ລວມຄວາມວ່າ ເຫຼືອໄວ້ແຕ່ຊື່ເທົ່ານັ້ນ ເພື່ອກ່າວຂານກັນ

ຄຳວ່າ ຈາກໄປແລ້ວ ໃນຄຳວ່າ ສັດເກີດຈາກໄປແລ້ວ ໄດ້ແກ່ ຕາຍແລ້ວ ທຳກາລະແລ້ວ

ຄຳວ່າ ສັດເກີດ ໄດ້ແກ່ ສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກຳ ມະນຸດ ລວມຄວາມວ່າ ສັດທີ່ເກີດຈາກໄປແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຊື່ຂອງຊົນເຫຼົ່າໃດທີ່ກ່າວກັນຢູ່ນີ້
ຊົນເຫຼົ່ານັ້ນຍັງເຫັນກັນຢູ່ແດ່ ຍັງໄດ້ຍິນກັນຢູ່ແດ່
ສັດທີ່ເກີດຈາກໄປແລ້ວເຫຼືອໄວ້ແຕ່ຊື່ເທົ່ານັ້ນ ເພື່ອກ່າວຂານກັນ

[໘໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຊົນທັງຫຼາຍ ຜູ້ຕິດໃຈໃນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ
ຍ່ອມລະຖິ້ມຄວາມເສົ້າໂສກ ຄວາມຮ່ຳໄຮແລະຄວາມຂີ້ຖີ່ບໍ່ໄດ້
ຍ້ອນເຫດນັ້ນ ມຸນີຜູ້ເຫັນແດນກະເສມ ລະຄວາມຍຶດຖືໄດ້ແລ້ວ ທ່ຽວໄປ

ຄຳວ່າ ຊົນທັງຫຼາຍ ຜູ້ຕິດໃຈໃນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ຍ່ອມລະຖິ້ມຄວາມ ເສົ້າໂສກ ຄວາມຮ່ຳໄຮແລະຄວາມຂີ້ຖີ່ບໍ່ໄດ້ ອະທິບາຍວ່າ

ຄຳວ່າ ຄວາມເສົ້າໂສກ ໄດ້ແກ່ ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມເສົ້າໂສກພາຍໃນ ຄວາມເສົ້າໂສກຫຼາຍພາຍໃນ ຄວາມມີກໄໝ້ພາຍໃນ ຄວາມຮ້ອນ ຮົນພາຍໃນ ຄວາມມີກໄໝ້ແຫ່ງຈິດ ຄວາມທຸກໃຈ ລູກສອນຄືຄວາມເສົ້າໂສກຂອງຜູ້ຖືກຄວາມເສຍຫາຍຂອງຍາດກະທົບແດ່ ຖືກຄວາມເສຍຫາຍແຫ່ງໂພຄະຊັບກະທົບແດ່ ຖືກຄວາມເສຍຫາຍຍ້ອນໂຣກກະທົບແດ່ ຖືກສີນວິບັດກະທົບແດ່ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວແລ້ວກະທົບແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

ຄຳວ່າ ຄວາມຮ່ຳໄຮ ໄດ້ແກ່ ຄວາມຈົ່ມເພີ້ ຄວາມຮ່ຳໄຮ ກິຣິຍາທີ່ຈົ່ມເພີ້ ກິຣິຍາທີ່ຮ່ຳໄຮ ພາວະທີ່ຈົ່ມເພີ້ ພາວະທີ່ຮ່ຳໄຮ ການເວົ້າລ່າຍ ການເວົ້າເພີ້ ການເວົ້າເພີ້ເຈີ້ ຄວາມພ່ຳເພີ້ ກິຣິຍາທີ່ພ່ຳເພີ້ ພາວະທີ່ພ່ຳເພີ້ ຂອງຜູ້ຖືກຄວາມເສຍຫາຍຂອງຍາດກະທົບແດ່ ຯລຯ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນ ນອກຈາກທີ່ກ່າວແລ້ວກະທົບແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

## ວ່າດ້ວຍຄວາມຂີ້ຖີ່ ໕ ຢ່າງ

ຄຳວ່າ ຄວາມຂີ້ຖີ່ ໄດ້ແກ່ ມັດສະຣິຍະ ໕ ຢ່າງ ຄື

໑. ອາວາດມັດສະຣິຍະ
໒. ກຸລະມັດສະຣິຍະ
໓. ລາບະມັດສະຣິຍະ
໔. ວັນນະມັດສະຣິຍະ
໕. ທຳມະມັດສະຣິຍະ

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມເຫັນແກ່ໄດ້ ຄວາມແໜ້ນໜຽວ ຄວາມທີ່ຈິດເຈັບຮ້ອນ (ໃນການໃຫ້) ຄວາມທີ່ຈິດຫວງແຫນເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຂີ້ຖີ່

ອີກໄນໜຶ່ງ ຄວາມຂີ້ຖີ່ຂັນກໍດີ ຄວາມຂີ້ຖີ່ທາດກໍດີ ຄວາມຂີ້ຖີ່ອາຍະຕະນະກໍດີ ຄວາມມຸ້ງແຕ່ຈະໄດ້ກໍດີ ນີ້ຕັດຮຽກວ່າ ຄວາມຂີ້ຖີ່

ຕັນຫາ ຕັດຮຽກວ່າຄວາມຕິດໃຈ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າ ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ

ຊົນທັງຫຼາຍຜູ້ຫວາດຣະແວງວ່າວັດຖຸທີ່ຍຶດຖືວ່າ ເປັນຂອງເຮົາຈະຖືກແຍ່ງຊີງໄປຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນກຳລັງຖືກແຍ່ງຊີງໄປຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນຖືກແຍ່ງຊີງໄປແລ້ວຍ່ອມເສົ້າໂສກແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າວັດຖຸທີ່ຍຶດຖືວ່າເປັນຂອງເຮົາຈະ ຜັນປ່ຽນໄປຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນກຳລັງຜັນປ່ຽນໄປຍ່ອມເສົ້າໂສກແດ່ ເມື່ອວັດຖຸນັ້ນຜັນປ່ຽນໄປແລ້ວຍ່ອມເສົ້າໂສກແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າວັດຖຸທີ່ຍຶດຖືວ່າ ເປັນຂອງເຮົາຈະຖືກແຍ່ງຊີງໄປຍ່ອມຮ່ຳໄຮແດ່ ເມື່ອວັດຖຸນັ້ນກຳລັງຖືກແຍ່ງຊີງໄປຍ່ອມ ຄ່ຳຄວນແດ່ ເມື່ອວັດຖຸນັ້ນຖືກແຍ່ງຊີງໄປແລ້ວຍ່ອມຮ່ຳໄຮແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າວັດຖຸທີ່ຍຶດຖືວ່າເປັນຂອງເຮົາຈະຜັນປ່ຽນໄປຍ່ອມຮ່ຳໄຮແດ່ ເມື່ອວັດຖຸນັ້ນ ກຳລັງຜັນປ່ຽນໄປ ຍ່ອມຮ່ຳໄຮແດ່ ເມື່ອວັດຖຸນັ້ນຜັນປ່ຽນໄປແລ້ວກໍຍ່ອມຮ່ຳໄຮແດ່

ຊົນທັງຫຼາຍຍ່ອມຮັກສາ ປົກປ້ອງ ຖືຄອງ ຍຶດຖື ສິ່ງທີ່ຍຶດຖືວ່າເປັນຂອງເຮົາ ປະພຶດຂີ້ຖີ່ວ່າເປັນຂອງເຮົາ ຍ່ອມເສົ້າໂສກ ຍ້ອນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ຈຶ່ງລະຄວາມເສົ້າໂສກບໍ່ໄດ້ ລະຄວາມຮ່ຳໄຮບໍ່ໄດ້ ລະຄວາມຂີ້ຖີ່ບໍ່ໄດ້ ລະຄວາມຕິດໃຈບໍ່ໄດ້ ລະບໍ່ໄດ້ ຄື ລະເວັ້ນບໍ່ໄດ້ ບັນເທົາບໍ່ໄດ້ ເຮັດໃຫ້ໝົດສິ້ນໄປບໍ່ໄດ້ ໃຫ້ເຖິງຄວາມບໍ່ມີອີກບໍ່ໄດ້ ລວມຄວາມວ່າ ຊົນທັງຫຼາຍ ຜູ້ຕິດໃຈໃນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ ຍ່ອມລະຖິ້ມຄວາມເສົ້າໂສກ ຄວາມຮ່ຳໄຮແລະຄວາມຂີ້ຖີ່ບໍ່ໄດ້

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ມຸນີຜູ້ເຫັນແດນກະເສມ ລະຄວາມຍຶດຖືໄດ້ແລ້ວທ່ຽວໄປ ໄດ້ແກ່ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ເມື່ອເຫັນໂທດນີ້ໃນການຍຶດຖືວ່າເປັນຂອງເຮົາ ລວມຄວາມວ່າ ຍ້ອນເຫດນັ້ນ

## ວ່າດ້ວຍໂມເນີຍຍະທຳ ໓ ປະການ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜູ້ປະກອບດ້ວຍຍານນັ້ນ ຊື່ວ່າມຸນີ ຄື ຜູ້ບັນລຸໂມນະຍານແລ້ວ ໂມເນີຍຍະທຳ (ທຳທີ່ເຮັດໃຫ້ເປັນມຸນີ) ມີ ໓ ປະການ ຄື

໑. ໂມເນີຍຍະທຳທາງກາຍ
໒. ໂມເນີຍຍະທຳທາງວາຈາ
໓. ໂມເນີຍຍະທຳທາງໃຈ ຯລຯ

ຜູ້ກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ຄວາມຍຶດຖື ໄດ້ແກ່ ຄວາມຍຶດຖື ໒ ຢ່າງ ຄື (໑) ຄວາມຍຶດຖືດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດທິດຖິ

ມຸນີລະຄວາມຍຶດຖືດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຍຶດຖືດ້ວຍອຳນາດ ທິດຖິໄດ້ແລ້ວ ລະ ຄື ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ທ່ຽວໄປ ໄດ້ແກ່ ປະພຶດ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ

ຄຳວ່າ ຜູ້ເຫັນແດນກະເສມ ອະທິບາຍວ່າ ອະມະຕະນິບພານ ຕັດຮຽກວ່າ ແດນກະເສມ ຄື ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ

ຄຳວ່າ ຜູ້ເຫັນແດນກະເສມ ໄດ້ແກ່ ຜູ້ເຫັນແດນກະເສມ ຄື ເຫັນທີ່ປົກປ້ອງ ເຫັນທີ່ ຫຼົບຫຼີກ ເຫັນທີ່ເພິ່ງ ເຫັນທີ່ບໍ່ມີໄພ ເຫັນທີ່ບໍ່ຈຸຕິ ເຫັນອະມະຕະທຳ ເຫັນນິບພານ ລວມ ຄວາມວ່າ ຍ້ອນເຫດນັ້ນ ມຸນີຜູ້ເຫັນແດນກະເສມ ລະຄວາມຍຶດຖືໄດ້ແລ້ວ ທ່ຽວໄປ ດ້ວຍ ເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຊົນທັງຫຼາຍ ຜູ້ຕິດໃຈໃນວັດຖຸທີ່ຍຶດຖືວ່າເປັນຂອງເຮົາ
ຍ່ອມລະຖິ້ມຄວາມເສົ້າໂສກ ຄວາມຮ່ຳໄຮແລະຄວາມຂີ້ຖີ່ບໍ່ໄດ້
ຍ້ອນເຫດນັ້ນ ມຸນີຜູ້ເຫັນແດນກະເສມ ລະຄວາມຍຶດຖືໄດ້ແລ້ວທ່ຽວໄປ

[໔໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບັນດິດທັງຫຼາຍກ່າວການບໍ່ສະແດງຕົນໃນພົບ
ຂອງພິກຂຸຜູ້ປະພຶດຫຼົບຫຼີກ ໃຊ້ບ່ອນນັ່ງອັນສະຫງັດນັ້ນວ່າ
ເປັນຄວາມສາມັກຄີ

## ວ່າດ້ວຍຜູ້ປະພຶດຫຼົບຫຼີກ

ຄຳວ່າ ຂອງພິກຂຸຜູ້ປະພຶດຫຼົບຫຼີກ ອະທິບາຍວ່າ ພຣະເສຂະ ໗ ຈຳພວກ ຕັດຮຽກວ່າຜູ້ປະພຶດຫຼົບຫຼີກ (ສ່ວນ) ພຣະອະຣະຫັນ ຊື່ວ່າຜູ້ຫຼົບຫຼີກແລ້ວ

ຍ້ອນເຫດໃດ ພຣະເສຂະ ໗ ຈຳພວກ ຈຶ່ງຕັດຮຽກວ່າ ຜູ້ປະພຶດຫຼົບຫຼີກ ພຣະເສຂະເຫຼົ່ານັ້ນ ໃຫ້ຈິດຫຼົບຫຼີກ ຖອຍກັບ ໝຸນກັບ ປິດກັ້ນ ຂົ່ມ ຫ້າມ ຮັກສາ ຄຸ້ມຄອງຈິດຈາກອາລົມນັ້ນ ທ່ຽວໄປ ປະພຶດ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ຄືໃຫ້ຈິດຫຼົບຫຼີກ ຖອຍກັບ ໝຸນກັບ ປິດກັ້ນ ຂົ່ມ ຫ້າມ ຮັກສາ ຄຸ້ມຄອງຈິດ ໃນຈັກຂຸທະວານ ທ່ຽວໄປ ປະພຶດ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ຄື ໃຫ້ຈິດຫຼົບຫຼີກ ຖອຍກັບ ປິດກັ້ນ ຂົ່ມ ຫ້າມ ຮັກສາ ຄຸ້ມຄອງຈິດ ໃນໂສຕະທະວານ ฯລฯ ໃນຄານະທະວານ ฯລฯ ໃນຊິວຫາທະວານ ฯລฯ ໃນກາຍທະວານ ฯລฯ ໃນມະໂນທະວານ ฯລฯ

ພຣະເສຂະເຫຼົ່ານັ້ນ ໃຫ້ຈິດຫຼີບຫຼີກ ຖອຍກັບ ໝຸນກັບ ປິດກັ້ນ ຂົ່ມ ຫ້າມ ຮັກສາ ຄຸ້ມຄອງຈິດຈາກອາລົມນັ້ນ ໆ ທ່ຽວໄປ ປະພຶດ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ຄື ໃຫ້ຈິດຫຼີບຫຼີກ ຖອຍກັບ ໝຸນກັບ ປິດກັ້ນ ຂົ່ມ ຫ້າມ ຮັກສາ ຄຸ້ມຄອງຈິດໃນຈັກຂຸທະວານ ຯລຯ ໃນໂສຕະທະວານ .. ໃນຄານະທະວານ ຯລຯ ໃນຊິວຫາທະວານ ຯລຯ ໃນກາຍທະວານ ຯລຯ ໃນມະໂນທະວານ ທ່ຽວໄປ ປະພຶດ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ປຽບເໝືອນຂົນໄກ່ ຫຼື ເສັ້ນເອັນທີ່ໃສ່ເຂົ້າໄປໃນໄຟແລ້ວ ຍ່ອມຫັກ ງໍ ມ້ວນ ບໍ່ຄາຍອອກແນວນັ້ນ ຍ້ອນເຫດນັ້ນ ພຣະເສຂະ ກໍ ຈຳພວກ ຈຶ່ງຕັດຮຽກວ່າ ຜູ້ປະພຶດຫຼີບຫຼີກ

ຄຳວ່າ ຂອງພິກຂຸ ໄດ້ແກ່ ຂອງພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ຂອງພິກຂຸຜູ້ເປັນພຣະເສຂະ ລວມຄວາມວ່າ ຂອງພິກຂຸຜູ້ປະພຶດຫຼີບຫຼີກ

ຄຳວ່າ ໃຊ້ບ່ອນນັ່ງອັນສະຫງັດ ອະທິບາຍວ່າ ບ່ອນສຳລັບນັ່ງຂອງພິກຂຸ ຕັດຮຽກວ່າບ່ອນນັ່ງ ໄດ້ແກ່ ຕຽງ ຕັ່ງ ເບາະ ເສື່ອ ແຜ່ນໜັງ ເຄື່ອງປູລາດເຮັດດ້ວຍຫຍ້າ ເຄື່ອງປູລາດເຮັດດ້ວຍໃບໄມ້ ເຄື່ອງປູລາດເຮັດດ້ວຍເຟືອງ ບ່ອນນັ່ງນັ້ນວ່າງ ສະຫງັດ ງຽບຈາກການໄດ້ເຫັນຮູບບໍ່ເປັນທີ່ສະບາຍ ຯລຯ ຈາກການໄດ້ຍິນສຽງບໍ່ເປັນທີ່ສະບາຍ ຯລຯ ຈາກການໄດ້ກິ່ນບໍ່ເປັນທີ່ສະບາຍ ຯລຯ ຈາກການໄດ້ຊີມຣົດບໍ່ເປັນທີ່ສະບາຍ ຯລຯ ຈາກການຖືກຕ້ອງໂຜດຖັບພະບໍ່ເປັນທີ່ສະບາຍ ຯລຯ ບ່ອນນັ່ງນັ້ນວ່າງ ສະຫງັດ ງຽບຈາກກາມມະຄຸນ ໕ ບໍ່ເປັນທີ່ສະບາຍ ຜູ້ໃຊ້ ຄື ໃຊ້ສອຍ ເສບ ເສບເປັນນິດ ຊ່ອງເສບ ເສບສະເພາະບ່ອນນັ່ງອັນສະຫງັດນັ້ນ ລວມຄວາມວ່າ ໃຊ້ບ່ອນນັ່ງອັນສະຫງັດ

ຄຳວ່າ ຄວາມສາມັກຄີ ໃນຄຳວ່າ ບັນດິດທັງຫຼາຍກ່າວການບໍ່ສະແດງຕົນ ໃນພົບຂອງພິກຂຸ ຯລຯ ນັ້ນວ່າ ເປັນຄວາມສາມັກຄີ ໄດ້ແກ່ ສາມັກຄີ ໓ ຢ່າງ ຄື

໑. ຄົນສາມັກຄີ
໒. ທຳມະສາມັກຄີ
໓. ອະນະພິນິບພັດຕິສາມັກຄີ

ຄົນສາມັກຄີ ເປັນແນວໃດ?

ຄື ແມ່ນຫາກພິກຂຸທັງຫຼາຍເປັນຈຳນວນຫຼາຍ ພ້ອມພຽງກັນ ຊື່ນຊົມ ບໍ່ວິວາດກັນ ເປັນເໝືອນນ້ຳກົມກືນກັບນ້ຳນົມ ແນມເບິ່ງກັນແລະກັນດ້ວຍສາຍຕາທີ່ຮັກກັນຢູ່ ນີ້ຊື່ວ່າ ຄົນສາມັກຄີ

ທຳມະສາມັກຄີ ເປັນແນວໃດ?

ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດ ຊົງ ກໍ ອະຣິຍະມັກມີອົງ ໘ ທຳເຫຼົ່ານັ້ນຍ່ອມດຳເນີນໄປ ຜ່ອງໃສ ຕັ້ງໝັ້ນ ຫຼຸດພົ້ນໄປ ໂດຍຄວາມເປັນອັນດຽວກັນ ທຳເຫຼົ່ານັ້ນບໍ່ມີຄວາມວິວາດຂັດແຍ່ງກັນ ນີ້ຊື່ວ່າທຳມະສາມັກຄີ

ອະນະພິນິບພັດຕິສາມັກຄີ ເປັນແນວໃດ?

ຄື ແມ່ນຫາກພິກຂຸເປັນຈຳນວນຫຼາຍ ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ຄວາມຂາດ ຫຼື ຄວາມເຕັມແຫ່ງນິບພານທາດຂອງພິກຂຸເຫຼົ່ານັ້ນຍ່ອມບໍ່ຜາກົດ ນີ້ຊື່ວ່າອະນະພິນິບພັດຕິສາມັກຄີ

ຄຳວ່າ ໃນພົບ ອະທິບາຍວ່າ ນະຣົກເປັນພົບຂອງສັດນະຣົກ ກຳເນີດເດຍຣັດສານ ເປັນພົບຂອງສັດຜູ້ເກີດໃນກຳເນີດເດຍຣັດສານ ເຜດວິໄສເປັນພົບຂອງສັດຜູ້ເກີດໃນເຜດວິໄສ ມະນຸດໂລກເປັນພົບຂອງມະນຸດ ເທວະໂລກເປັນພົບຂອງໝູ່ເທວະດາ

ຄຳວ່າ ບັນດິດທັງຫຼາຍກ່າວການບໍ່ສະແດງຕົນໃນພົບຂອງພິກຂຸ ໆລໆ ນັ້ນວ່າ ເປັນຄວາມສາມັກຄີ ອະທິບາຍວ່າ ບັນດິດທັງຫຼາຍກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ແນວນີ້ວ່າ ພິກຂຸໃດ ບໍ່ສະແດງຕົນໃນນະຣົກອັນປົກປິດ ບໍ່ສະແດງຕົນໃນກຳເນີດເດຍຣັດສານ ບໍ່ສະແດງຕົນໃນເຜດວິໄສ ບໍ່ສະແດງຕົນໃນມະນຸດໂລກ ບໍ່ສະແດງຕົນໃນເທວະໂລກແນວນີ້ ການບໍ່ສະແດງຕົນຂອງພິກຂຸນັ້ນເປັນຄວາມສາມັກຄີ ຄື ຂໍ້ນີ້ ເປັນການປົກປິດ ເປັນການເໝາະສົມ ເປັນການສົມຄວນ ເປັນການອະນຸໂລມ ລວມຄວາມວ່າ ບັນດິດທັງຫຼາຍກ່າວການບໍ່ສະແດງຕົນໃນພົບຂອງພິກຂຸ ໆລໆ ນັ້ນວ່າ ເປັນຄວາມສາມັກຄີ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

> ບັນດິດທັງຫຼາຍກ່າວການບໍ່ສະແດງຕົນໃນພົບ
> ຂອງພິກຂຸຜູ້ປະພຶດຫຼີກຫຼີກ ໃຊ້ບ່ອນນັ່ງອັນສະຫງັດນັ້ນວ່າ
> ເປັນຄວາມສາມັກຄີ

[໘໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

> ມຸນີບໍ່ອາໄສໃນສິ່ງທັງປວງ ບໍ່ເຮັດສັດສັງຂານໃດໃຫ້ເປັນທີ່ຮັກ
> ແລະບໍ່ເຮັດສັດສັງຂານໃດໃຫ້ບໍ່ເປັນທີ່ຮັກ
> ຄວາມຮ່ຳໄຮແລະຄວາມຂີ້ຖີ່ ບໍ່ຕິດຢູ່ໃນມຸນີນັ້ນ
> ເໝືອນຢາດນ້ຳບໍ່ຕິດຢູ່ເທິງໃບບົວ ສັນນັ້ນ

ຄຳວ່າ ມຸນີບໍ່ອາໄສໃນສິ່ງທັງປວງ ອະທິບາຍວ່າ ອາຍະຕະນະ ໑໘ ຕັດຮຽກວ່າ ສິ່ງທັງປວງ ຄື ຕາແລະຮູບ ຫູແລະສຽງ ດັງແລະກິ່ນ ລີ້ນແລະຣົດ ກາຍແລະໂຜດຖັບພະ ໃຈແລະທຳມາຣົມ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ໆລໆ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ບໍ່ອາໄສ ໄດ້ແກ່ ຄວາມອາໄສ ໒ ຢ່າງ ຄື (໑) ຄວາມອາໄສດ້ວຍອຳນາດຕັນຫາ (໒) ຄວາມອາໄສດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດທິດຖິ

ມຸນີລະຄວາມອາໄສດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມອາໄສດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ອາໄສຕາ ຯລຯ ຫູ ຯລຯ ດັງ ຯລຯ ລີ້ນ ຯລຯ ກາຍ ຯລຯ ໃຈ ຯລຯ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ທຳມາຣົມ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ກາມທາດ ຯລຯ ຮູບທາດ ຯລຯ ອະຮູບທາດ ຯລຯ ກາມພົບ ຯລຯ ຮູບພົບ ຯລຯ ອະຮູບພົບ ຯລຯ ສັນຍາພົບ ຯລຯ ອະສັນຍາພົບ ຯລຯ ເນວະສັນຍານາສັນຍາຍະຕະນະພົບ ຯລຯ ເອກະໂວກາຣະພົບ ຯລຯ ຈະຕຸໂວກາຣະພົບ ຯລຯ ປັນຈະໂວກາຣະພົບ ຯລຯ ພົບອະດີດ ຯລຯ ພົບອະນາຄົດ ຯລຯ ພົບປັດຈຸບັນ ບໍ່ອາໄສຮູບທີ່ເຫັນ ຯລຯ ສຽງທີ່ໄດ້ຍິນ ຯລຯ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ຮູ້ແຈ້ງແລ້ວ ມຸນີບໍ່ອາໄສ ຄື ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ບໍ່ຕິດໃຈແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງກັບທຳທັງປວງແລ້ວ ມີໃຈເປັນອິດສະຫຼະ (ຈາກຄວາມອາໄສ) ຢູ່ ລວມຄວາມວ່າ ມຸນີບໍ່ອາໄສໃນສິ່ງທັງປວງ

## ວ່າດ້ວຍສິ່ງເປັນທີ່ຮັກ ໒ ຈຳພວກ

ຄຳວ່າ ບໍ່ເຮັດສັດສັງຂານໃດໃຫ້ເປັນທີ່ຮັກ ແລະບໍ່ເຮັດສັດສັງຂານໃດໃຫ້ບໍ່ເປັນທີ່ຮັກ ອະທິບາຍວ່າ

ຄຳວ່າ ເປັນທີ່ຮັກ ໄດ້ແກ່ ສິ່ງເປັນທີ່ຮັກ ໒ ຈຳພວກ ຄື (໑) ສັດ (໒) ສັງຂານ

ສັດເຫຼົ່າໃດເປັນທີ່ຮັກ ສັດທັງຫຼາຍໃນໂລກນີ້ ເປັນຜູ້ປາຖະໜາແຕ່ສິ່ງທີ່ເປັນ ປະໂຫຍດ ປາຖະໜາແຕ່ສິ່ງທີ່ເກື້ອກູນ ປາຖະໜາແຕ່ຄວາມຜາສຸກ ປາຖະໜາແຕ່ຄວາມຫຼຸດພົ້ນຈາກໂຍຄະ ຄື ມານດາ ບິດາ ອ້າຍນ້ອງຊາຍ ເອື້ອຍ ນ້ອງສາວ ບຸດ ທິດາ ມິດ ອຳມາດ ຍາດ ຫຼື ຜູ້ຮ່ວມສາຍໂລຫິດຂອງຜູ້ນັ້ນ ສັດເຫຼົ່ານີ້ ຊື່ວ່າສິ່ງເປັນທີ່ຮັກ

ສັງຂານເຫຼົ່າໃດເປັນທີ່ຮັກ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ອັນໜ້າພໍໃຈ ສັງຂານເຫຼົ່ານີ້ ຊື່ວ່າສິ່ງເປັນທີ່ຮັກ

ຄຳວ່າ ບໍ່ເປັນທີ່ຮັກ ໄດ້ແກ່ ສິ່ງບໍ່ເປັນທີ່ຮັກ ໒ ຈຳພວກ ຄື (໑) ສັດ (໒) ສັງຂານ

ສັດເຫຼົ່າໃດບໍ່ເປັນທີ່ຮັກ ສັດທັງຫຼາຍໃນໂລກນີ້ເປັນຜູ້ປາຖະໜາແຕ່ສິ່ງທີ່ບໍ່ແມ່ນປະໂຫຍດ ປາຖະໜາແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ຄວາມບໍ່ຜາສຸກ ບໍ່ປາຖະໜາຄວາມຫຼຸດພົ້ນຈາກໂຍຄະ ປາຖະໜາຈະປົງຊີວິດຂອງຜູ້ນັ້ນ ສັດເຫຼົ່ານີ້ ຊື່ວ່າບໍ່ເປັນທີ່ຮັກ

ສັງຂານເຫຼົ່າໃດບໍ່ເປັນທີ່ຮັກ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະອັນບໍ່ໜ້າພໍໃຈ ສັງຂານເຫຼົ່ານີ້ ຊື່ວ່າບໍ່ເປັນທີ່ຮັກ

ຄຳວ່າ ບໍ່ເຮັດສັດສັງຂານໃດໃຫ້ເປັນທີ່ຮັກ ແລະບໍ່ເຮັດສັດສັງຂານໃດໃຫ້ບໍ່ເປັນທີ່ຮັກ ອະທິບາຍວ່າ ບໍ່ເຮັດໃຫ້ເປັນທີ່ຮັກດ້ວຍອຳນາດຣາຄະວ່າ ສັດນີ້ເປັນທີ່ຮັກຂອງເຮົາ ສັງຂານເຫຼົ່ານີ້ເປັນທີ່ພໍໃຈຂອງເຮົາ ບໍ່ເຮັດໃຫ້ບໍ່ເປັນທີ່ຮັກດ້ວຍອຳນາດປະຕິຄະ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນວ່າ ສັດນີ້ບໍ່ເປັນທີ່ຮັກຂອງເຮົາ ສັງຂານເຫຼົ່ານີ້ບໍ່ເປັນທີ່ພໍໃຈຂອງເຮົາ ລວມຄວາມວ່າ ບໍ່ເຮັດສັດສັງຂານໃດໃຫ້ເປັນທີ່ຮັກ ແລະບໍ່ເຮັດສັດສັງຂານໃດໃຫ້ບໍ່ເປັນທີ່ຮັກ

ຄຳວ່າ ໃນມຸນີນັ້ນ ໃນຄຳວ່າ ຄວາມຮ່ຳໄຮແລະຄວາມຂີ້ຖີ່ບໍ່ຕິດຢູ່ໃນມຸນີນັ້ນ ເໝືອນຢາດນ້ຳບໍ່ຕິດຢູ່ເທິງໃບບົວ ໄດ້ແກ່ ໃນບຸກຄົນຜູ້ເປັນພຣະອະຣະຫັນຕະຂີນາສົບ

ຄຳວ່າ ຄວາມຮ່ຳໄຮ ໄດ້ແກ່ ຄວາມຈົ່ມເພີ້ ຄວາມຮ່ຳໄຮ ກິຣິຍາທີ່ຈົ່ມເພີ້ ກິຣິຍາທີ່ຮ່ຳໄຮ ພາວະທີ່ຈົ່ມເພີ້ ພາວະທີ່ຮ່ຳໄຮ ການເວົ້າລ່າຍ ການເວົ້າເພີ້ ການເວົ້າເພີ້ເຈີ້ ຄວາມພ່ຳເພີ້ ກິຣິຍາທີ່ພ່ຳເພີ້ ພາວະທີ່ພ່ຳເພີ້ ຂອງຜູ້ຖືກຄວາມເສຍຫາຍຂອງຍາດກະທົບແດ່ ຖືກຄວາມເສຍຫາຍແຫ່ງໂພຄະຊັບກະທົບແດ່ ຖືກຄວາມເສຍຫາຍຍ້ອນໂຣກກະທົບແດ່ ຖືກ ສີນວິບັດກະທົບແດ່ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວແລ້ວແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

ຄຳວ່າ ຄວາມຂີ້ຖີ່ ໄດ້ແກ່ ມັດສະຣິຍະ ໕ ຢ່າງ ຄື

໑. ອາວາດມັດສະຣິຍະ
໒. ກຸລະມັດສະຣິຍະ
໓. ລາບະມັດສະຣິຍະ
໔. ວັນນະມັດສະຣິຍະ
໕. ທຳມະມັດສະຣິຍະ

ຄື ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມເຫັນແກ່ໄດ້ ຄວາມຖີ່ໜຽວ ຄວາມທີ່ຈິດເຈັບຮ້ອນ (ໃນການໃຫ້) ຄວາມທີ່ຈິດຫວງແຫນເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຂີ້ຖີ່

ອີກໄນໜຶ່ງ ຄວາມຂີ້ຖີ່ຂັນກໍດີ ຄວາມຂີ້ຖີ່ທາດກໍດີ ຄວາມຂີ້ຖີ່ອາຍະຕະນະ ກໍດີ ຄວາມມຸ້ງແຕ່ຈະໄດ້ກໍດີ ນີ້ຕັດຮຽກວ່າ ຄວາມຂີ້ຖີ່

ຄຳວ່າ ບໍ່ຕິດຢູ່ ໆລໆ ເໝືອນຢາດນ້ຳບໍ່ຕິດຢູ່ເທິງໃບບົວ ອະທິບາຍວ່າ ໃບຂອງບົວຕັດຮຽກວ່າ ໃບບົວ ນ້ຳຕັດຮຽກວ່າ ຢາດນ້ຳ ຄວາມຮ່ຳໄຮແລະຄວາມຂີ້ຖີ່ ບໍ່ຕິດ ຄື ບໍ່ຕິດແໜ້ນ ບໍ່ຕິດພັນ ໄດ້ແກ່ ເປັນສະພາບບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ໃນບຸກຄົນຜູ້ເປັນພຣະອະຣະຫັນຕະຂີນາສົບນັ້ນ ເໝືອນຢາດນ້ຳ ບໍ່ຕິດ ຄື ບໍ່ຕິດແໜ້ນ ບໍ່ຕິດພັນ ໄດ້ແກ່ ເປັນຂອງບໍ່ຕິດແລ້ວ ເປັນຂອງບໍ່ຕິດແໜ້ນແລ້ວ ເປັນຂອງບໍ່ຕິດພັນແລ້ວເທິງໃບບົວແນວນັ້ນ

ອັນໜຶ່ງ ບຸກຄົນຜູ້ເປັນພຣະອະຣະຫັນນັ້ນ ບໍ່ຕິດ ຄື ບໍ່ຕິດແໜ້ນ ບໍ່ຕິດພັນ ໄດ້ແກ່ ເປັນຜູ້ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວກັບກິເລດເຫຼົ່ານັ້ນ ມີໃຈເປັນອິດສະຫຼະຢູ່ ລວມຄວາມວ່າ ຄວາມຮ່ຳໄຮແລະຄວາມຂີ້ຖີ່ ບໍ່ຕິດຢູ່ໃນມຸນີນັ້ນ ເໝືອນຢາດນ້ຳບໍ່ຕິດເທິງໃບບົວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກ ເຈົ້າຈຶ່ງຕັດວ່າ

ມຸນີບໍ່ອາໄສໃນສິ່ງທັງປວງ ບໍ່ເຮັດສັດສັງຂານໃດໃຫ້ເປັນທີ່ຮັກ
ແລະບໍ່ເຮັດສັດສັງຂານໃດໃຫ້ບໍ່ເປັນທີ່ຮັກ
ຄວາມຮ່ຳໄຮແລະຄວາມຂີ້ຖີ່ ບໍ່ຕິດຢູ່ໃນມຸນີນັ້ນ
ເໝືອນຢາດນ້ຳບໍ່ຕິດຢູ່ເທິງໃບບົວ ແນວນັ້ນ

[໘໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີບໍ່ຕິດພັນໃນຮູບທີ່ເຫັນ ສຽງທີ່ໄດ້ຍິນແລະອາລົມທີ່ຮັບຮູ້
ເໝືອນຢາດນ້ຳບໍ່ຕິດເທິງໃບບົວ
ເໝືອນຢາດນ້ຳບໍ່ຕິດເທິງດອກບົວ ແນວນັ້ນ

ຄຳວ່າ ເໝືອນຢາດນ້ຳບໍ່ຕິດເທິງໃບບົວ ອະທິບາຍວ່າ ເມັດນ້ຳ ຕັດຮຽກວ່າ ຢາດນ້ຳ ໃບຂອງບົວ ຕັດຮຽກວ່າ ໃບບົວ ປຽບເໝືອນຢາດນ້ຳ ບໍ່ຕິດ ຄື ບໍ່ຕິດແໜ້ນ ບໍ່ຕິດພັນ ໄດ້ແກ່ ເປັນຂອງບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ເທິງໃບບົວ ລວມຄວາມວ່າ ເໝືອນຢາດນ້ຳບໍ່ຕິດເທິງໃບບົວ

ຄຳວ່າ ເໝືອນຢາດນ້ຳບໍ່ຕິດເທິງດອກບົວ ອະທິບາຍວ່າ ດອກຂອງບົວ ຕັດຮຽກວ່າ ດອກບົວນ້ຳຕັດຮຽກວ່າ ຢາດນ້ຳ ປຽບເໝືອນຢາດນ້ຳບໍ່ຕິດ ຄື ບໍ່ຕິດແໜ້ນ ບໍ່ຕິດພັນ ໄດ້ແກ່ ເປັນຂອງບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວເທິງດອກບົວ ລວມຄວາມວ່າ ເໝືອນຢາດນ້ຳບໍ່ຕິດເທິງດອກບົວແນວນັ້ນ

ຄຳວ່າ ເໝືອນ ໆລໆ ສະນັ້ນ ໃນຄຳວ່າ ມຸນີບໍ່ຕິດພັນໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ແລະອາລົມທີ່ຮັບຮູ້ເໝືອນ ໆລໆ ສະນັ້ນ ເປັນຄຳອຸປະໄມເຮັດອຸປະມາໃຫ້ສົມບູນ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ໆລໆ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ຄວາມຕິດ ໄດ້ແກ່ ຄວາມຕິດ ໒ ຢ່າງ ຄື (໑) ຄວາມຕິດດ້ວຍອຳນາດ ຕັນຫາ (໒) ຄວາມຕິດດ້ວຍອຳນາດທິດຖິ ໆລໆ ນີ້ຊື່ວ່າຄວາມຕິດດ້ວຍອຳນາດຕັນຫາ ໆລໆ ນີ້ຊື່ວ່າຄວາມຕິດດ້ວຍອຳນາດທິດຖິ

ມຸນີລະຄວາມຕິດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຕິດດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ຕິດໃນຮູບທີ່ເຫັນ ບໍ່ຕິດໃນສຽງທີ່ໄດ້ຍິນ ບໍ່ຕິດໃນອາລົມທີ່ຮັບຮູ້ ບໍ່ຕິດໃນທຳມາຣົມທີ່ຮູ້ແຈ້ງແລ້ວ ຄື ບໍ່ຕິດແໜ້ນ ບໍ່ຕິດພັນ ໄດ້ແກ່ ເປັນຜູ້ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ມຸນີບໍ່ຕິດພັນໃນຮູບທີ່ເຫັນ ສຽງທີ່ໄດ້ຍິນແລະອາລົມທີ່ຮັບຮູ້ ເໝືອນ ຯລຯ ສະນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີບໍ່ຕິດພັນໃນຮູບທີ່ເຫັນ ສຽງທີ່ໄດ້ຍິນແລະອາລົມທີ່ຮັບຮູ້
ເໝືອນຢາດນ້ຳບໍ່ຕິດເທິງໃບບົວ
ເໝືອນຢາດນ້ຳບໍ່ຕິດເທິງດອກບົວ ແນວນັ້ນ

[໔໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພຣະອະຣະຫັນຜູ້ມີປັນຍາເຄື່ອງກຳຈັດ
ຍ່ອມບໍ່ສຳຄັນໝາຍຮູບທີ່ເຫັນ
ສຽງທີ່ໄດ້ຍິນແລະອາລົມທີ່ຮັບຮູ້
ພຣະອະຣະຫັນນັ້ນບໍ່ຕ້ອງການຄວາມມົດຈິດດ້ວຍມັກອື່ນ
ຍ່ອມບໍ່ກຳໜັດ ຍ່ອມບໍ່ຕ້ອງຄາຍກຳໜັດ

ຄຳວ່າ ຜູ້ມີປັນຍາເຄື່ອງກຳຈັດ ໃນຄຳວ່າ ພຣະອະຣະຫັນຜູ້ມີປັນຍາເຄື່ອງກຳຈັດ ຍ່ອມບໍ່ສຳຄັນໝາຍຮູບທີ່ເຫັນ ສຽງທີ່ໄດ້ຍິນແລະອາລົມທີ່ຮັບຮູ້ ອະທິບາຍວ່າ ປັນຍາ ຕັດຮຽກວ່າ ເຄື່ອງກຳຈັດ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິ

ຍ້ອນເຫດໃດ ປັນຍາຈຶ່ງຕັດຮຽກວ່າ ເຄື່ອງກຳຈັດ ຍ້ອນປັນຍານັ້ນເປັນເຄື່ອງກຳຈັດຊຳຣະ ລ້າງ ຊັກຟອກກາຍທຸດຈະຣິດ ຯລຯ ວະຈີທຸດຈະຣິດ ຯລຯ ມະໂນທຸດຈະຣິດ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖຳພະ ຯລຯ ສາຣຳພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ເປັນເຄື່ອງກຳຈັດ ຊຳຣະລ້າງ ແລະຊັກຟອກ ອະກຸສະລາພິສັງຂານທຸກປະເພດ ຍ້ອນເຫດນັ້ນ ປັນຍາຈຶ່ງຕັດຮຽກວ່າ ເຄື່ອງກຳຈັດ

ອີກໄນໜຶ່ງ ສຳມາທິດຖິ ເປັນເຄື່ອງກຳຈັດ ຊຳຣະ ລ້າງແລະຊັກຟອກມິດສາທິດຖິໄດ້

ສຳມາສັງກັບປະ ເປັນເຄື່ອງກຳຈັດ ຯລຯ ມິດສາສັງກັບປະໄດ້
ສຳມາວາຈາ ເປັນເຄື່ອງກຳຈັດ ຯລຯ ມິດສາວາຈາໄດ້
ສຳມາກຳມັນຕະ ເປັນເຄື່ອງກຳຈັດ ຯລຯ ມິດສາກຳມັນຕະໄດ້
ສຳມາອາຊີວະ ເປັນເຄື່ອງກຳຈັດ ຯລຯ ມິດສາອາຊີວະໄດ້
ສຳມາວາຍາມະ ເປັນເຄື່ອງກຳຈັດ ຯລຯ ມິດສາວາຍາມະໄດ້
ສຳມາສະຕິ ເປັນເຄື່ອງກຳຈັດ ຯລຯ ມິດສາສະຕິໄດ້
ສຳມາສະມາທິ ເປັນເຄື່ອງກຳຈັດ ຯລຯ ມິດສາສະມາທິໄດ້
ສຳມາຍານະ ເປັນເຄື່ອງກຳຈັດ ຯລຯ ມິດສາຍານະໄດ້
ສຳມາວິມຸດຕິ ເປັນເຄື່ອງກຳຈັດ ຊຳຮະ ລ້າງ ແລະຊັກຟອກມິດສາວິມຸດຕິໄດ້

ອີກໄນໜຶ່ງ ອະຣິຍະມັກມີອົງ ໘ ເປັນເຄື່ອງກຳຈັດ ຊຳຮະ ລ້າງ ແລະຊັກຟອກກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ ພຣະອະຣະຫັນ ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍທຳເປັນເຄື່ອງກຳຈັດເຫຼົ່ານີ້ ຍ້ອນເຫດນັ້ນ ພຣະອະຣະຫັນຈຶ່ງຊື່ວ່າຜູ້ມີປັນຍາເຄື່ອງ ກຳຈັດ ພຣະອະຣະຫັນນັ້ນ ເປັນຜູ້ກຳຈັດຄວາມກຳໜັດໄດ້ແລ້ວ ກຳຈັດບາບໄດ້ແລ້ວ ກຳຈັດກິເລດໄດ້ແລ້ວ ກຳຈັດຄວາມຮ້ອນຮົນໄດ້ແລ້ວ ລວມຄວາມວ່າ ຜູ້ມີປັນຍາເຄື່ອງກຳຈັດ

ຄຳວ່າ ພຣະອະຣະຫັນຜູ້ມີປັນຍາເຄື່ອງກຳຈັດ ຍ່ອມບໍ່ສຳຄັນໝາຍຮູບທີ່ເຫັນ ສຽງ ທີ່ໄດ້ຍິນແລະອາລົມທີ່ຮັບຮູ້ ອະທິບາຍວ່າ ພຣະອະຣະຫັນຜູ້ມີປັນຍາເຄື່ອງກຳຈັດ ຍ່ອມບໍ່ສຳຄັນໝາຍຮູບທີ່ເຫັນ ບໍ່ສຳຄັນໝາຍໃນຮູບທີ່ເຫັນ ບໍ່ສຳຄັນໝາຍໂດຍຮູບທີ່ເຫັນ ຄື ບໍ່ສຳຄັນໝາຍວ່າ ເຮົາເຫັນຮູບແລ້ວ ບໍ່ສຳຄັນໝາຍສຽງທີ່ໄດ້ຍິນ ບໍ່ສຳຄັນໝາຍໃນສຽງທີ່ໄດ້ຍິນ ບໍ່ສຳຄັນ ໝາຍໂດຍສຽງທີ່ໄດ້ຍິນ ຄື ບໍ່ສຳຄັນໝາຍວ່າ ເຮົາໄດ້ຍິນສຽງແລ້ວ ບໍ່ສຳຄັນໝາຍອາລົມທີ່ຮັບຮູ້ ບໍ່ສຳຄັນໝາຍໃນອາລົມທີ່ຮັບຮູ້ ບໍ່ສຳຄັນໝາຍໂດຍອາລົມທີ່ຮັບຮູ້ ຄື ບໍ່ສຳຄັນໝາຍວ່າ ເຮົາຮັບຮູ້ອາລົມແລ້ວ ບໍ່ສຳຄັນໝາຍທຳມາຣົມທີ່ຮູ້ແຈ້ງ ບໍ່ສຳຄັນໝາຍໃນທຳມາຣົມທີ່ຮູ້ແຈ້ງ ບໍ່ສຳຄັນໝາຍໂດຍທຳມາຣົມທີ່ຮູ້ແຈ້ງ ຄື ບໍ່ສຳຄັນໝາຍວ່າ ເຮົາຮູ້ແຈ້ງທຳມາຣົມແລ້ວ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພິກຂຸທັງຫຼາຍ ປຸຖຸຊົນສຳຄັນໝາຍກັນວ່າ ເຮົາມີຢູ່ ຯລຯ ເຮົານີ້ມີຢູ່ ຯລຯ ເຮົາຈັກມີ ຯລຯ ເຮົາຈັກບໍ່ມີ ຯລຯ ເຮົາຈັກເປັນຜູ້ມີຮູບ ຯລຯ ເຮົາຈັກເປັນຜູ້ບໍ່ມີຮູບ ຯລຯ ເຮົາຈັກເປັນຜູ້ມີສັນຍາ ຯລຯ ເຮົາຈັກເປັນຜູ້ບໍ່ມີສັນຍາ ຯລຯ ເຮົາຈັກເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ຯລຯ ພິກຂຸທັງຫຼາຍ ຄວາມສຳຄັນໝາຍເປັນໂຣກ ເປັນຫົວຝີ ເປັນລູກສອນ ເປັນອຸປັດທະວະ ພິກຂຸທັງຫຼາຍ

ຍ້ອນເຫດນັ້ນແລ ພວກທ່ານເພິ່ງສຶກສາໃນທຳວິໄນແນວນີ້ວ່າ ພວກເຮົາຈັກມີຈິດບໍ່ສຳຄັນໝາຍຢູ່ ລວມຄວາມວ່າ ພຣະອະຣະຫັນ ຜູ້ມີປັນຍາເຄື່ອງກຳຈັດ ຍ່ອມບໍ່ສຳຄັນໝາຍຮູບທີ່ເຫັນສຽງທີ່ໄດ້ຍິນແລະອາລົມທີ່ຮັບຮູ້

ຄຳວ່າ ພຣະອະຣະຫັນນັ້ນບໍ່ຕ້ອງການຄວາມມົດຈົດດ້ວຍມັກອື່ນ ອະທິບາຍວ່າ ພຣະອະຣະຫັນຜູ້ມີປັນຍາເຄື່ອງກຳຈັດ ຍ່ອມບໍ່ຕ້ອງການ ຄື ຍ່ອມບໍ່ຍິນດີ ບໍ່ປາຖະໜາ ບໍ່ມຸ້ງໝາຍ ບໍ່ມຸ້ງຫວັງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປດ້ວຍມັກອື່ນ ຄື ດ້ວຍມັກທີ່ບໍ່ມົດຈົດ ປະຕິປະທາທີ່ຜິດ ທາງທີ່ບໍ່ນຳອອກຈາກທຸກນອກຈາກສະຕິປັດຖານ ສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງ ແລະອະຣິຍະມັກມີອົງ ໘ ລວມຄວາມວ່າ ພຣະອະຣະຫັນນັ້ນບໍ່ຕ້ອງການ ຄວາມມົດຈົດດ້ວຍມັກອື່ນ

ຄຳວ່າ ພຣະອະຣະຫັນນັ້ນຍ່ອມບໍ່ກຳໜັດ ຍ່ອມບໍ່ຕ້ອງຄາຍກຳໜັດ ອະທິບາຍວ່າ ພານປຸຖຸຊົນທັງປວງຍ່ອມກຳໜັດ ພຣະເສຂະ ໗ ຈຳພວກລວມທັງກັນລະຍານະປຸຖຸຊົນ ຍ່ອມຄາຍກຳໜັດ ພຣະອະຣະຫັນຍ່ອມບໍ່ກຳໜັດ ຍ່ອມບໍ່ຄາຍກຳໜັດ ພຣະອະຣະຫັນນັ້ນຄາຍ ກຳໜັດແລ້ວຍ້ອນເປັນຜູ້ປາສະຈາກຣາຄະ ເຫດສິ້ນຣາຄະ ຍ້ອນເປັນຜູ້ປາສະຈາກໂທສະ ເຫດສິ້ນໂທສະຍ້ອນເປັນຜູ້ປາສະຈາກໂມຫະ ເຫດສິ້ນໂມຫະ ທ່ານຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ຯລຯ ພຣະອະຣະຫັນບໍ່ມີການວຽນເກີດ ວຽນແກ່ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ພຣະອະຣະຫັນນັ້ນຍ່ອມບໍ່ກຳໜັດ ຍ່ອມບໍ່ຕ້ອງຄາຍ ກຳໜັດ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພຣະອະຣະຫັນຜູ້ມີປັນຍາເຄື່ອງກຳຈັດ
ຍ່ອມບໍ່ສຳຄັນໝາຍຮູບທີ່ເຫັນ
ສຽງທີ່ໄດ້ຍິນແລະອາລົມທີ່ຮັບຮູ້
ພຣະອະຣະຫັນນັ້ນບໍ່ຕ້ອງການຄວາມມົດຈົດດ້ວຍມັກອື່ນ
ຍ່ອມບໍ່ກຳໜັດ ຍ່ອມບໍ່ຕ້ອງຄາຍກຳໜັດ

**ຊະຣາສຸດຕະນິດເທດທີ ໖ ຈົບ**

# ໗. ຕິດສະເມດເຕີຍຍະສຸດຕະນິດເທດ

## ອະທິບາຍຕິດສະເມດເຕີຍຍະສູດ

### ວ່າດ້ວຍບັນຫາຂອງຕິດສະເມດເຕີຍຍະ

ພຣະສາຣີບຸດເຖຣະຈະກ່າວອະທິບາຍຕິດສະເມດເຕີຍຍະສູດ ດັ່ງຕໍ່ໄປນີ້

[໔໙] (ທ່ານພຣະຕິດສະເມດເຕີຍຍະຂາບທູນດັ່ງນີ້)

ຂ້າແດ່ ພຣະອົງຜູ້ນິຣະທຸກ ຂໍພຣະອົງໂຜດຕັດບອກ
ຄວາມຄັບແຄ້ນຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ
ພວກຂ້າພຣະອົງຟັງຄຳສອນຂອງພຣະອົງແລ້ວຈັກສຶກສາວິເວກ

### ວ່າດ້ວຍເມຖຸນທຳ

ຄຳວ່າ ຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ ອະທິບາຍວ່າ ທຳນຽມຂອງ ອະສັດຕະບຸຣຸດ ຄື ທຳນຽມຂອງຊາວບ້ານ ທຳນຽມຊັ້ນຕ່ຳ ທຳນຽມທີ່ຊົ່ວຊາມ ທຳນຽມທີ່ມີນ້ຳເປັນບ່ອນສຸດ ທຳນຽມທີ່ປະຕິບັດກັນໃນບ່ອນລັບ ທຳນຽມທີ່ຕ້ອງປະຕິບັດກັນເປັນຄູ່ ໆ ຊື່ວ່າເມຖຸນທຳ

ຍ້ອນເຫດໃດ ຈຶ່ງຕັດຮຽກວ່າ ເມຖຸນທຳ ຍ້ອນທຳນັ້ນເປັນທຳນຽມຂອງ ຄົນຄູ່ ຜູ້ກຳໜັດ ກຳໜັດແຮງ ປຽກຊຸ່ມ ກັດກຸ້ມດ້ວຍຣາຄະ ຖືກຣາຄະຄອບງຳຈິດສະເໝີກັນທັງ ໒ ຄົນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ຄົນ ໒ ຄົນກໍ່ການຜິດຖຽງກັນ ຮຽກວ່າ ຄູ່ຜິດຖຽງ
ຄົນ ໒ ຄົນກໍ່ການໝາງໃຈກັນ ຮຽກວ່າ ຄູ່ໝາງໃຈ
ຄົນ ໒ ຄົນກໍ່ການອື້ສາວກັນ ຮຽກວ່າ ຄູ່ອື້ສາວ
ຄົນ ໒ ຄົນກໍ່ການວິວາດກັນ ຮຽກວ່າ ຄູ່ວິວາດ
ຄົນ ໒ ຄົນກໍ່ອະທິກອນກັນ ຮຽກວ່າ ຄູ່ອະທິກອນ
ຄົນ ໒ ຄົນສົນທະນາກັນ ຮຽກວ່າ ຄູ່ສົນທະນາ
ຄົນ ໒ ຄົນເຈຣະຈາກັນ ຮຽກວ່າ ຄູ່ເຈຣະຈາ ສັນໃດ

ທຳນັ້ນເປັນທຳນຽມຂອງຄົນຄູ່ ຜູ້ກຳໜັດ ກຳໜັດແຮງ ປຽກຊຸ່ມ ກັດກຸ້ມ ດ້ວຍຣາຄະ ຖືກຣາຄະຄອບງຳຈິດສະເໝີກັນທັງ ໒ ຄົນ ສັນນັ້ນຄືກັນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ຄຳວ່າ ຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ ໄດ້ແກ່ ຂອງບຸກຄົນຜູ້ປະກອບ ປະກອບທົ່ວ ປະກອບທົ່ວເຖິງ ປະກອບພ້ອມໃນເມຖຸນທຳ ຄື ຜູ້ປະພຶດເລື້ອງນັ້ນ ຫຼາຍເກີນໄປ ດ້ວຍເລື້ອງນັ້ນ ໜັກໃນເລື້ອງນັ້ນ ເອນໄປໃນເລື້ອງນັ້ນ ໂອນໄປໃນເລື້ອງນັ້ນ ໂນ້ມໄປ ໃນເລື້ອງ ນັ້ນ ນ້ອມໃຈໄປໃນເລື້ອງນັ້ນ ມຸ້ງເລື້ອງນັ້ນເປັນໃຫຍ່ ລວມຄວາມວ່າ ຂອງບຸກຄົນຜູ້ ປະກອບ ເມຖຸນທຳເນືອງ ໆ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານພຣະຕິດສະເມດເຕີຍຍະຂາບທູນດັ່ງນີ້ ເປັນບົດສົນທິ ເປັນ ຄຳເຊື່ອມບົດ ເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະ ສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາຣົບ ເປັນຄຳກ່າວ ທີ່ມີຄວາມເຄົາຣົບ ຄຳວ່າ ທ່ານ ນີ້ ເປັນຄຳກ່າວສະແດງຄວາມຢຳເກງ

ຄຳວ່າ ຕິດສະ ເປັນຊື່ຂອງພຣະເຖຣະນັ້ນ ຄື ເປັນການກ່າວເຖິງ ການຂະໜານນາມ ການບັນຍັດ ຊື່ທີ່ຮຽກກັນ ຊື່ ການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະ

ຄຳວ່າ ເມດເຕີຍຍະ ເປັນໂຄດຂອງພຣະເຖຣະນັ້ນ ຄື ເປັນການກ່າວເຖິງ ການ ຂະໜ ານນາມ ການບັນຍັດ ຊື່ທີ່ຮຽກກັນ ລວມຄວາມວ່າ ທ່ານພຣະຕິດສະເມດເຕີຍຍະ ຂາບທູນດັ່ງນີ້

ຄຳວ່າ ຄວາມຄັບແຄ້ນ ໃນຄຳວ່າ ຂ້າແດ່ພຣະອົງຜູ້ນິຣະທຸກ ຂໍພຣະອົງໂຜດ ຕັດບອກ ຄວາມຄັບແຄ້ນ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຄວາມຄັບແຄ້ນ ຄື ຄວາມ ຄຽດແຄ້ນ ຄວາມບີບຄັ້ນ ຄວາມອຶດອັດ ຄວາມບຽດບຽນ ຄວາມຂັດຂ້ອງ

ຄຳວ່າ ຂ້າແດ່ພຣະອົງຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວ ໂດຍຄວາມ ເຄົາຣົບ ເປັນຄຳກ່າວທີ່ມີຄວາມເຄົາຣົບ ຄຳວ່າ ຂ້າແດ່ພຣະອົງຜູ້ນິຣະທຸກ ນີ້ ເປັນຄຳກ່າວ ສະແດງຄວາມຢຳເກງ ລວມຄວາມວ່າ ຂ້າແດ່ພຣະອົງຜູ້ນິຣະທຸກ ຂໍພຣະອົງໂຜດຕັດບອກຄວາມ ຄັບແຄ້ນ

ຄຳວ່າ ຟັງຄຳສັ່ງສອນຂອງພຣະອົງແລ້ວ ອະທິບາຍວ່າ ຟັງແລ້ວ ຄື ສະດັບແລ້ວ ຮຽນ ແລ້ວ ຊົງຈຳແລ້ວ ກຳນົດແລ້ວເຊິ່ງພຣະດຳຣັດ ຄຳທີ່ເປັນແນວທາງ ເທດສະໜາ ຄຳ ສັ່ງສອນ ຄຳສັ່ງສອນຂອງພຣະອົງ ລວມຄວາມວ່າ ຟັງຄຳສັ່ງສອນຂອງພຣະອົງແລ້ວ

## ວ່າດ້ວຍວິເວກ ໓

ຄຳວ່າ ພວກຂ້າພຣະອົງ ຯລຯ ຈັກສຶກສາວິເວກ ອະທິບາຍວ່າ

ຄຳວ່າ ວິເວກ ໄດ້ແກ່ ວິເວກ ໓ ຢ່າງ ຄື (໑) ກາຍວິເວກ (ຄວາມສະຫງັດກາຍ) (໒) ຈິດຕະວິເວກ (ຄວາມສະຫງັດໃຈ) (໓) ອຸປະທິວິເວກ (ຄວາມສະຫງັດອຸປະທິ)

ກາຍວິເວກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ່ອມໃຊ້ສອຍເສນາສະນະທີ່ສະຫງັດ ຄື ປ່າ ເຫງົ້າຕົ້ນໄມ້ ພູເຂົາ ຮ່ອມພູ ປ່ອງພູ ປ່າຊ້າ ປ່າດົງດິບ ກາງແຈ້ງ ກອງເຟືອງ ແລະມີກາຍສະຫງັດຢູ່ ຄື ຍ່າງອົງດຽວ ຢືນອົງດຽວ ນັ່ງອົງດຽວ ນອນອົງດຽວ ເຂົ້າໝູ່ບ້ານບິນທະບາດອົງດຽວ ກັບອົງດຽວ ນັ່ງໃນບ່ອນລັບອົງດຽວ ອະທິຖານຈົງກົມອົງດຽວ ທ່ຽວໄປ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປລຳພັງອົງດຽວ ນີ້ຊື່ວ່າກາຍວິເວກ

ຈິດຕະວິເວກ ເປັນແນວໃດ?

ຄື ຜູ້ບັນລຸປະຖົມຊານຍ່ອມມີຈິດສະຫງັດຈາກນິວອນ ຜູ້ບັນລຸທຸຕິຍະຊານຍ່ອມມີຈິດສະຫງັດຈາກວິຕົກແລະວິຈານ ຜູ້ບັນລຸຕະຕິຍະຊານຍ່ອມມີຈິດສະຫງັດຈາກປິຕິ ຜູ້ບັນລຸຈະຕຸດຖະຊານຍ່ອມມີຈິດສະຫງັດຈາກສຸກແລະທຸກ ຜູ້ບັນລຸອາກາສານັນຈາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກ ຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ ຜູ້ບັນລຸວິນຍານັນຈາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກອາກາສານັນຈາຍະຕະນະສັນຍາ ຜູ້ບັນລຸອາກິນຈັນຍາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກວິນຍານັນຈາຍະຕະນະສັນຍາ ຜູ້ບັນລຸເນວະສັນຍານາສັນຍາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກອາກິນຈັນຍາຍະຕະນະສັນຍາ

ຜູ້ເປັນພຣະໂສດາບັນ ຍ່ອມມີຈິດສະຫງັດຈາກສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ທິດຖານຸໄສ ວິຈິກິດສານຸໄສ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບສັກກາຍະ ທິດຖິເປັນຕົ້ນນັ້ນ

ຜູ້ເປັນພຣະສະກະທາຄາມີ ຍ່ອມມີຈິດສະຫງັດຈາກກາມຣາຄະສັງໂຍດ ປະຕິຄະສັງໂຍດຢ່າງຫຍາບ ກາມຣາຄານຸໄສ ປະຕິຄານຸໄສ ຢ່າງຫຍາບ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບກາມຣາຄະສັງໂຍດເປັນຕົ້ນນັ້ນ

ຜູ້ເປັນພຣະອະນາຄາມີ ຍ່ອມມີຈິດສະຫງັດຈາກກາມຣາຄະສັງໂຍດ ປະຕິຄະສັງໂຍດຢ່າງລະອຽດ ກາມຣາຄານຸໄສ ປະຕິຄານຸໄສ ຢ່າງລະອຽດ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບກາມຣາຄະສັງໂຍດເປັນຕົ້ນນັ້ນ

ຜູ້ເປັນພຣະອະຣະຫັນ ຍ່ອມມີຈິດສະຫງັດຈາກຣູບຣາຄະ ອະຣູບຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ເຫຼົ່າກິເລດທີ່ຢູ່ໃນພວກດຽວກັບຮູບຣາຄະເປັນຕົ້ນນັ້ນ ແລະສັງຂານນິມິດທັງປວງໃນພາຍນອກ ນີ້ຊື່ວ່າຈິດຕະວິເວກ

ອຸປະທິວິເວກ ເປັນແນວໃດ?

ຄື ກິເລດກໍດີ ຂັນກໍດີ ອະພິສັງຂານກໍດີ ຕັດຮຽກວ່າ ອຸປະທິ ອະມະຕະນິບພານ ຕັດຮຽກວ່າ ອຸປະທິວິເວກ ຄື ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ນີ້ຊື່ວ່າ ອຸປະທິວິເວກ

ກາຍວິເວກຍ່ອມມີແກ່ບຸກຄົນຜູ້ມີກາຍຫຼີກອອກແລ້ວ ຍິນດີໃນເນກຂຳມະ ຈິດຕະວິເວກ ຍ່ອມມີແກ່ບຸກຄົນຜູ້ມີຈິດບໍລິສຸດ ເຖິງຄວາມເປັນຜູ້ຜ່ອງແຜ້ວຍິ່ງ ແລະອຸປະທິເວກຍ່ອມມີແກ່ ບຸກຄົນຜູ້ປາສະຈາກອຸປະທິ ບັນລຸນິບພານອັນປາສະຈາກປັດໄຈປຸງແຕ່ງແລ້ວ

ຄຳວ່າ ພວກຂ້າພຣະອົງ ຯລຯ ຈັກສຶກສາວິເວກ ອະທິບາຍວ່າ ພຣະເຖຣະນັ້ນສຶກສາ ສຶກຂາແລ້ວໂດຍປົກກະຕິ ອີກໄນໜຶ່ງ ມຸ້ງໝາຍພຣະທຳມະເທດສະໜາ ທູນຂໍພຣະທຳມະເທດ ສະໜາ ຈຶ່ງຂາບທູນແນວນີ້ວ່າ ພວກຂ້າພຣະອົງ ຯລຯ ຈັກສຶກສາວິເວກ ດ້ວຍເຫດນັ້ນ ພຣະ ຕິດສະເມດເຕີຍຍະເຖຣະຈຶ່ງຂາບທູນວ່າ

ຂ້າແດ່ ພຣະອົງຜູ້ນິຣະທຸກ ຂໍພຣະອົງໂຜດຕັດບອກຄວາມຄັບແຄ້ນຂອງບຸກຄົນຜູ້ ປະກອບເມຖຸນທຳເນືອງ ໆ ພວກຂ້າພຣະອົງຟັງຄຳສອນຂອງພຣະອົງແລ້ວຈັກສຶກສາວິເວກ

[໕໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມດເຕີຍຍະ)

ຄຳສັ່ງສອນຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ ຍ່ອມເລີເລືອນ ແລະບຸກຄົນນັ້ນຍ່ອມ ປະຕິບັດຜິດ ການປະຕິບັດນີ້ ເປັນທຳບໍ່ປະເສີດໃນບຸກຄົນນັ້ນ

ຄຳວ່າ ຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ ອະທິບາຍວ່າ ທຳນຽມຂອງ ອະສັດຕະ ບຸຣຸດ ຄື ທຳນຽມຂອງຊາວບ້ານ ທຳນຽມຊັ້ນຕ່ຳ ທຳນຽມທີ່ຊົ່ວຊາມ ທຳນຽມທີ່ມີນ້ຳເປັນບ່ອນສຸດ ທຳນຽມທີ່ປະຕິບັດກັນໃນບ່ອນລັບ ທຳນຽມທີ່ຕ້ອງປະຕິບັດກັນເປັນຄູ່ ໆ ຊື່ວ່າເມຖຸນທຳ

ຍ້ອນເຫດໃດ ຈຶ່ງຕັດຮຽກວ່າ ເມຖຸນທຳ ຍ້ອນທຳນັ້ນເປັນທຳນຽມຂອງ ຄົນຄູ່ ຜູ້ກຳໜັດ ກຳໜັດແຮງ ປຽກຊຸ່ມ ກັດກຸ້ມດ້ວຍຣາຄະ ຖືກຣາຄະຄອບງຳຈິດສະເໝີກັນທັງ ໒ ຄົນ ຍ້ອນ ເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ຄົນ ໒ ຄົນກໍ່ການຜິດຖຽງກັນ ຮຽກວ່າ ຄູ່ຜິດຖຽງ
ຄົນ ໒ ຄົນກໍ່ການໝາງໃຈກັນ ຮຽກວ່າ ຄູ່ໝາງໃຈ
ຄົນ ໒ ຄົນກໍ່ການອື້ສາວກັນ ຮຽກວ່າ ຄູ່ອື້ສາວ
ຄົນ ໒ ຄົນກໍ່ການວິວາດກັນ ຮຽກວ່າ ຄູ່ວິວາດ
ຄົນ ໒ ຄົນກໍ່ອະທິກອນກັນ ຮຽກວ່າ ຄູ່ອະທິກອນ
ຄົນ ໒ ຄົນສົນທະນາກັນ ຮຽກວ່າ ຄູ່ສົນທະນາ
ຄົນ ໒ ຄົນເຈຣະຈາກັນ ຮຽກວ່າ ຄູ່ເຈຣະຈາ ສັນໃດ

ທຳນັ້ນເປັນທຳນຽມຂອງຄົນຄູ່ ຜູ້ກຳໜັດ ກຳໜັດແຮງ ປຽກຊຸ່ມ ກັດກຸ້ມ ດ້ວຍຣາຄະ ຖືກ ຣາຄະຄອບງຳຈິດສະເໝີກັນທັງ ໒ ຄົນ ສັນນັ້ນຄືກັນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ຄຳວ່າ ຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ ໄດ້ແກ່ ຂອງບຸກຄົນຜູ້ປະກອບ ປະກອບທົ່ວ ປະກອບທົ່ວເຖິງ ປະກອບພ້ອມໃນເມຖຸນທຳ ຄື ຜູ້ປະພຶດເລື້ອງນັ້ນ ຫຼາຍເກີນໄປ

ດ້ວຍເລື້ອງນັ້ນ ໜັກໃນເລື້ອງນັ້ນ ເອນໄປໃນເລື້ອງນັ້ນ ໂອນໄປໃນເລື້ອງນັ້ນ ໂນ້ມໄປໃນ ເລື້ອງນັ້ນ ນ້ອມໃຈໄປໃນເລື້ອງນັ້ນ ມຸ້ງເລື້ອງນັ້ນເປັນໃຫຍ່ ລວມຄວາມວ່າ ຂອງບຸກຄົນຜູ້ ປະກອບເມຖຸນທຳເນືອງ ໆ

## ອະທິບາຍຄຳວ່າ ພະຄະວາ

ຄຳວ່າ ເມດເຕີຍຍະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພຣະເຖຣະນັ້ນໂດຍໂຄດ
ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ
ອີກໄນໜຶ່ງ ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍຣາຄະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍ ໂທສະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍ ໂມຫະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍ ມານະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍ ທິດຖິໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍ ສັງບໜາມໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍ ກິເລດໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງຈຳແນກ ແຍກແຍະ ແຈກແຈງທຳຣັດຕະນະ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງເຮັດທີ່ສຸດແຫ່ງພົບໄດ້
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມພຣະວໍຣະກາຍແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມສີນ ອົບຮົມຈິດ ອົບຮົມປັນຍາແລ້ວ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ສອຍເສນາສະນະທີ່ເປັນປ່າເລົ່າ ແລະປ່າທຶບອັນສະຫງັດ ມີສັ້ງໜ້ອຍ ມີສຽງອືກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານທີ່ເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມີສ່ວນແຫ່ງຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັຊບໍຣິຂານ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງອັດຖະຣົດ ທຳມະຣົດ ວິມຸດຕິຣົດ ອະທິສີນ ອະທິຈິດ ອະທິປັນຍາ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຊານ ໔ ອັບປະມັນຍາ ໔ ອະຮູບສະມາບັດ ໔ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງວິໂມກ ໘ ອະພິພາຍະຕະນະ ໘ ອະນຸປຸບພະວິຫາຣະສະມາບັດ ໙ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສັນຍາພາວະນາ ໑໐ ກະສິນສະມາບັດ ໑໐ ອານາປານະສະຕິສະມາທິ ຜ ອະສຸພະສະມາບັດ ກ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຕະຖາຄົດພະລະຍານ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ ພະນາມວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງ ບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດແລະອຳມາດຕັ້ງ ບໍ່ແມ່ນພຣະຍາດແລະ ຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນວິໂມກຂັນຕິກະນາມ (ພະນາມໃນລຳດັບການບັນລຸ ອະຣະຫັດຕະຜົນ) ເປັນສັດສິກາບັນຍັດຕິ (ບັນຍັດທີ່ເກີດຍ້ອນຊົງຮູ້ແຈ້ງອະຣະຫັດຕະຜົນ) ຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ພ້ອມກັບການບັນລຸພຣະສັບພັນຍູຕະຍານ ທີ່ເຫງົ້າຕົ້ນໂພ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເມດເຕີຍຍະ

## ວ່າດ້ວຍຄຳສອນ ໒ ສ່ວນ

ຄຳວ່າ ຄຳສັ່ງສອນ ຯລຯ ຍ່ອມເລີເລືອນ ໄດ້ແກ່ ຄຳສັ່ງສອນເລີເລືອນໂດຍສ່ວນທັງ ໒ ຄື (໑) ຄຳສັ່ງສອນສ່ວນປະຣິຍັດເລີເລືອນ (໒) ຄຳສັ່ງສອນສ່ວນປະຕິບັດເລີເລືອນ

ຄຳສັ່ງສອນສ່ວນປະຣິຍັດ ເປັນແນວໃດ?

ຄື ຄຳສັ່ງສອນທີ່ຮ່ຳຮຽນຂອງເຂົາ ຄື ສຸດຕະ ເຄີຍຍະ ເວຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ນີ້ຊື່ວ່າຄຳສັ່ງສອນສ່ວນປະຣິຍັດ ຄຳສັ່ງສອນນັ້ນ ຍ່ອມເລີເລືອນ ຄື ຍ່ອມຟັ່ນເຟືອນ ຫຼົງລືມ ເລືອນຫາຍ ຫ່າງຫາຍ ລວມຄວາມວ່າ ຄຳສັ່ງສອນ ຯລຯ ຍ່ອມເລີເລືອນ ແນວນີ້ແດ່

ຄຳສັ່ງສອນສ່ວນປະຕິບັດ ເປັນແນວໃດ?

ຄື ການປະຕິບັດພໍ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ (ຕາ ຫູ ດັງ ລີ້ນ ກາຍ ໃຈ) ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະ ມັກ ມີອົງ ໘ ນີ້ຊື່ວ່າຄຳສັ່ງສອນສ່ວນປະຕິບັດ ຄຳສັ່ງສອນນັ້ນ ຍ່ອມເລີເລືອນ ຄື ຍ່ອມຟັ່ນເຟືອນ ຫຼົງລືມ ເລືອນຫາຍ ຫ່າງຫາຍ ລວມຄວາມວ່າ ຄຳສັ່ງສອນ ຯລຯ ຍ່ອມເລີເລືອນ ແນວນີ້ແດ່

ຄຳວ່າ ບຸກຄົນນັ້ນຍ່ອມປະຕິບັດຜິດ ອະທິບາຍວ່າ ບຸກຄົນນັ້ນຂ້າສັດແດ່ ລັກຊັບແດ່ ຕັດປ່ອງຍ່ອງເບົາແດ່ ຂະໂມຍຍົກເຄົ້າແດ່ ປຸ້ນບ້ານແດ່ ດັກຈີ້ໃນທາງປ່ຽວແດ່ ລະເມີດພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ລວມຄວາມວ່າ ບຸກຄົນນັ້ນຍ່ອມປະຕິບັດຜິດ

ຄຳວ່າ ການປະຕິບັດນີ້ ເປັນທຳບໍ່ປະເສີດໃນບຸກຄົນນັ້ນ ອະທິບາຍວ່າ ການປະຕິບັດຜິດເປັນທຳບໍ່ປະເສີດ ເປັນທຳຂອງຄົນໂງ່ ເປັນທຳຂອງຄົນຫຼົງ ເປັນທຳຂອງຄົນບໍ່ຮູ້ ເປັນທຳຂອງຄົນມີວາທະຫຼົບລ່ຽງບໍ່ແນ່ນອນ ໃນບຸກຄົນນັ້ນ ລວມຄວາມວ່າ ການປະຕິບັດນີ້ເປັນທຳບໍ່ປະເສີດໃນບຸກຄົນນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ ເມດເຕີຍຍະ

ຄຳສັ່ງສອນຂອງບຸກຄົນຜູ້ປະກອບເມຖຸນທຳເນືອງ ໆ
ຍ່ອມເລີເລືອນ ແລະບຸກຄົນນັ້ນຍ່ອມປະຕິບັດຜິດ
ການປະຕິບັດນີ້ ເປັນທຳບໍ່ປະເສີດໃນບຸກຄົນນັ້ນ

[໕໑] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ຜູ້ໃດໃນເບື້ອງຕົ້ນທ່ຽວໄປຜູ້ດຽວແລ້ວ
(ຕໍ່ມາ) ເຂົ້າໄປເສບເມຖຸນທຳ ຜູ້ຮູ້ທັງຫຼາຍຮຽກຜູ້ນັ້ນວ່າ
ເປັນປຸຖຸຊົນຊົ່ວໃນໂລກ ເໝືອນຍານທີ່ແລ່ນໄປ

## ວ່າດ້ວຍຜູ້ບວດແລ້ວສິກ

ຄຳວ່າ ໃນເບື້ອງຕົ້ນທ່ຽວໄປຜູ້ດຽວ ອະທິບາຍວ່າ ໃນເບື້ອງຕົ້ນທ່ຽວໄປຜູ້ດຽວດ້ວຍ ເຫດ ໒ ຢ່າງ ຄື (໑) ດ້ວຍການບວດ (໒) ດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະ

ໃນເບື້ອງຕົ້ນທ່ຽວໄປຜູ້ດຽວດ້ວຍການບວດ ເປັນແນວໃດ?

ຄື ຜູ້ນັ້ນຕັດຄວາມກັງວົນເລື້ອງການຄອງເຮືອນ ຕັດຄວາມກັງວົນເລື້ອງບຸດພັນລະຍາ ຕັດຄວາມກັງວົນເລື້ອງຍາດ ຕັດຄວາມກັງວົນເລື້ອງມິດແລະອຳມາດ ຕັດຄວາມກັງວົນເລື້ອງການສະສົມທັງໝົດ ແຖຜົມແລະໜວດແລ້ວ ນຸ່ງຫົ່ມຜ້າກາສາວະ ອອກຈາກເຮືອນບວດເປັນບັນພະຊິດ ເຂົ້າເຖິງຄວາມບໍ່ກັງວົນແລ້ວ ທ່ຽວໄປຜູ້ດຽວ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ຊື່ວ່າໃນເບື້ອງຕົ້ນທ່ຽວໄປຜູ້ດຽວດ້ວຍການບວດ ເປັນແນວນີ້

ໃນເບື້ອງຕົ້ນທ່ຽວໄປຜູ້ດຽວດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະ ເປັນແນວໃດ?

ຄື ທ່ານເມື່ອເປັນນັກບວດແລ້ວແນວນີ້ຜູ້ດຽວ ກໍໃຊ້ສອຍເສນາສະນະທີ່ເປັນປ່າເລົ່າແລະປ່າທຶບ ອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້

ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼົບຫຼີກ ທ່ານຍ່າງອົງດຽວ ຢືນອົງດຽວ ນັ່ງອົງດຽວ ນອນອົງດຽວ ເຂົ້າໝູ່ບ້ານເພື່ອບິນທະບາດອົງດຽວ ກັບມາອົງດຽວ ນັ່ງໃນບ່ອນລັບອົງດຽວ ອະທິຖານຈົງກົມອົງດຽວ ທ່ຽວໄປຜູ້ດຽວ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ຊື່ວ່າໃນເບື້ອງຕົ້ນທ່ຽວໄປຜູ້ດຽວດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະ ເປັນແນວນີ້

ຄຳວ່າ ຜູ້ໃດ ຯລຯ ເຂົ້າໄປເສບເມຖຸນທຳ ອະທິບາຍວ່າ ທຳນຽມຂອງອະສັດຕະບຸຣຸດ ຯລຯ ຊື່ວ່າເມຖຸນທຳ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ຄຳວ່າ ຜູ້ໃດ ຯລຯ ເຂົ້າໄປເສບເມຖຸນທຳ ອະທິບາຍວ່າ ຕໍ່ມາ ຜູ້ໃດບອກລາ ພຣະພຸດທະເຈົ້າ ພຣະທຳ ພຣະສົງ ສິກຂາ ກັບມາເປັນຄະລຶຫັດ ແລ້ວເສບ ເສບເປັນນິດ ຄື ຊ້ອງເສບ ເສບສະເພາະ ເຊິ່ງເມຖຸນທຳ ລວມຄວາມວ່າ ຜູ້ໃດ ຯລຯ ເຂົ້າໄປເສບເມຖຸນທຳ

ຄຳວ່າ ຍານ ໃນຄຳວ່າ ຜູ້ນັ້ນ ຯລຯ ໃນໂລກເໝືອນຍານທີ່ແລ່ນໄປ ສະນັ້ນ ອະທິບາຍວ່າ ຍານຄືຊ້າງ ຍານຄືມ້າ ຍານຄືງົວ ຍານຄືແບ້ ຍານຄືແກະ ຍານຄືອູດ ຍານ ຄືລາທີ່ແລ່ນໄປ ຄື ຍັງບໍ່ໄດ້ເຝິກຫັດ ຍັງບໍ່ໄດ້ເຝິກຝົນ ຍັງບໍ່ໄດ້ອົບຮົມ ຍ່ອມແລ່ນໄປ ຜິດທາງ ຄື ປີນຕໍໄມ້ແດ່ ກ້ອນຫີນແດ່ ເຊິ່ງບໍ່ຮາບພຽງ ທຳຮ້າຍຍານເອງແດ່ ຜູ້ຂັບຂີ່ແດ່ ຕົກລົງໄປໃນເຫວແດ່ ຜູ້ນັ້ນສິກແລ້ວ ປຽບໄດ້ກັບຍານທີ່ແລ່ນໄປ ຍ່ອມແລ່ນໄປສູ່ທາງຜິດ ຄື ຖືທິດຖິຜິດ ຯລຯ ຖືສະມາທິຜິດ ເໝືອນຍານທີ່ແລ່ນໄປນັ້ນ ຄືທີ່ຍັງບໍ່ໄດ້ເຝິກຫັດ ຍັງບໍ່ໄດ້ ເຝິກຝົນ ຍັງບໍ່ໄດ້ອົບຮົມ ຍ່ອມແລ່ນໄປຜິດທາງ ສັນນັ້ນ

ຜູ້ນັ້ນສິກແລ້ວປຽບໄດ້ກັບຍານທີ່ແລ່ນໄປ ຍ່ອມແລ່ນໄປສູ່ກາຍຍະກຳ ວະຈີກຳ ມະໂນກຳທີ່ຜິດ ປານາຕິບາດ ອະທິນນາທານ ກາເມສຸມິດສາຈາຣະ ມຸສາວາທະ ປິສຸນາວາຈາ ຜະຣຸສະວາຈາ ສຳຜັບປະລາປະ ອະພິດຊາ ພະຍາບາດ ມິດສາທິດຖິ ສັງຂານທັງຫຼາຍ ກາມມະຄຸນ ໕ ນິວອນ ໕ ເໝືອນຍານທີ່ແລ່ນໄປນັ້ນ ຄື ທີ່ຍັງບໍ່ໄດ້ເຝິກຫັດ ຍັງບໍ່ໄດ້ເຝິກຝົນ ຍັງບໍ່ໄດ້ອົບຮົມ ຍ່ອມປີນຕໍໄມ້ແດ່ ກ້ອນຫີນແດ່ ເຊິ່ງບໍ່ຮາບພຽງ ສັນນັ້ນ

ຜູ້ນັ້ນສິກແລ້ວປຽບໄດ້ກັບຍານທີ່ແລ່ນໄປ ຍ່ອມທຳລາຍຕົນໃນນະຣົກ ຍ່ອມທຳລາຍຕົນໃນກຳເນີດເດຍຣັດສານ ຍ່ອມທຳລາຍຕົນໃນເຜດວິໄສ ຍ່ອມທຳລາຍຕົນໃນມະນຸດໂລກ ຍ່ອມທຳລາຍຕົນໃນເທວະໂລກ ເໝືອນຍານທີ່ແລ່ນໄປນັ້ນ ຄື ທີ່ຍັງບໍ່ໄດ້ເຝິກຫັດ ຍັງບໍ່ໄດ້ເຝິກຝົນ ຍັງບໍ່ໄດ້ອົບຮົມ ຍ່ອມທຳລາຍຍານເອງແດ່ ຜູ້ຂັບຂີ່ແດ່ ສັນນັ້ນ

ຜູ້ນັ້ນສິກແລ້ວປຽບໄດ້ກັບຍານທີ່ແລ່ນໄປ ຍ່ອມຕົກໄປໃນເຫວຄືຊາດແດ່ ເຫວຄື ຊະຣາແດ່ ເຫວຄືພະຍາທິ (ຄວາມເຈັບປ່ວຍ) ແດ່ ເຫວຄືມໍຣະນະແດ່ ເຫວຄືໂສກະ (ຄວາມ ເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກຂະ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸ

ປາຍາດ (ຄວາມຄັບແຄ້ນໃຈ) ແດ່ ເໝືອນຍານທີ່ແລ່ນໄປນັ້ນ ຄື ທີ່ຍັງບໍ່ໄດ້ເຝິກຫັດ ຍັງບໍ່ໄດ້ເຝິກຝົນ ຍັງບໍ່ໄດ້ອົບຮົມ ຍ່ອມຕົກລົງໄປໃນເຫວແດ່ ສັນນັ້ນ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ມະນຸດໂລກ ລວມຄວາມວ່າ ຜູ້ນັ້ນ ຯລຯ ໃນໂລກ ເໝືອນຍານທີ່ແລ່ນໄປ ສັນນັ້ນ

ຄຳວ່າ ປຸຖຸຊົນ ໃນຄຳວ່າ ຜູ້ຮູ້ທັງຫຼາຍຮຽກ ຯລຯ ວ່າ ເປັນປຸຖຸຊົນຊົ່ວ ອະທິບາຍວ່າ ຊື່ວ່າປຸຖຸຊົນ ຍ້ອນມີຄວາມໝາຍວ່າແນວໃດ ຊື່ວ່າປຸຖຸຊົນ ຍ້ອນໃຫ້ກິເລດຫຍາບເກີດຂຶ້ນ ຊື່ວ່າປຸຖຸຊົນ ຍ້ອນມີສັກກາຍະທິດຖິອັນໜາແໜ້ນຍັງລະບໍ່ໄດ້ ຊື່ວ່າປຸຖຸຊົນ ຍ້ອນປະຕິຍານຕໍ່ໜ້າສາດສະດາຫຼາຍອົງ ຊື່ວ່າປຸຖຸຊົນ ຍ້ອນຖືກຄະຕິທຸກຢ່າງຮ້ອຍຮັດໄວ້ຫຼາຍ ຊື່ວ່າປຸຖຸຊົນ ຍ້ອນປຸງແຕ່ງອະພິສັງຂານຕ່າງ ໆ ເປັນຈຳນວນຫຼາຍ ຊື່ວ່າປຸຖຸຊົນ ຍ້ອນຖືກ ໂອຄະກິເລດຕ່າງ ໆ ເປັນຈຳນວນຫຼາຍພັດພາໄປ ຊື່ວ່າປຸຖຸຊົນ ຍ້ອນເດືອດຮ້ອນດ້ວຍຄວາມເດືອດຮ້ອນຕ່າງ ໆ ເປັນຈຳນວນຫຼາຍ ຊື່ວ່າປຸຖຸຊົນ ຍ້ອນຖືກຄວາມຮ້ອນຮົນຕ່າງ ໆ ຫຼວງຫຼາຍແຜດເຜົາ ຊື່ວ່າປຸຖຸຊົນ ຍ້ອນກຳໜັດ ຍິນດີ ຕິດໃຈ ມົກມຸ້ນ ເກາະຕິດ ກ່ຽວພັນ ພົວພັນໃນກາມມະຄຸນ ໕ ຫຼວງຫຼາຍ ຊື່ວ່າປຸຖຸຊົນ ຍ້ອນຖືກນິວອນ ໕ ຢ່າງ ຫຼວງຫຼາຍ ຫຸ້ມຫໍ່ ໂອບລ້ອມ ຫ້ອມລ້ອມ ຄອບຄຸມ ປົກຄຸມ ບົດບັງ

ຄຳວ່າ ຜູ້ຮູ້ທັງຫຼາຍຮຽກ ຯລຯ ວ່າ ເປັນປຸຖຸຊົນຊົ່ວ ອະທິບາຍວ່າ ຜູ້ຮູ້ທັງຫຼາຍຮຽກ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ແນວນີ້ວ່າ ເປັນປຸຖຸຊົນຊົ່ວ ຄື ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ຜູ້ຮູ້ທັງຫຼາຍຮຽກ ຯລຯ ວ່າ ເປັນປຸຖຸຊົນຊົ່ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຜູ້ໃດໃນເບື້ອງຕົ້ນທ່ຽວໄປຜູ້ດຽວແລ້ວ
(ຕໍ່ມາ) ເຂົ້າໄປເສບເມຖຸນທຳ ຜູ້ຮູ້ທັງຫຼາຍຮຽກຜູ້ນັ້ນວ່າ
ເປັນປຸຖຸຊົນຊົ່ວໃນໂລກ ເໝືອນຍານທີ່ແລ່ນໄປ

[໕໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍົດແລະກຽດໃນເບື້ອງຕົ້ນຂອງພິກຂຸນັ້ນເສື່ອມໄປ
ພິກຂຸເຫັນສົມບັດແລະວິບັດນີ້ແລ້ວ ເພິ່ງສຶກສາເພື່ອລະເມຖຸນທຳ

## ວ່າດ້ວຍຍົດແລະກຽດ

ຄຳວ່າ ຍົດແລະກຽດໃນເບື້ອງຕົ້ນຂອງພິກຂຸນັ້ນເສື່ອມໄປ ອະທິບາຍວ່າ
ຍົດ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ໄດ້ຮັບສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ໃນເບື້ອງຕົ້ນ ຄື ໃນເວລາທີ່ເປັນສະມະນະ ນີ້ຊື່ວ່າຍົດ

ກຽດ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ໄດ້ຮັບການສັນເສີນກຽດຕິຄຸນວ່າ ເປັນບັນດິດ ເປັນຜູ້ສະຫຼາດ ມີປັນຍາ ເປັນພະຫູສູດ ມີຄຳເວົ້າມ່ວນ ມີປະຕິພານດີ ເປັນຜູ້ຊົງຈຳພຣະສູດແດ່ ເປັນຜູ້ຊົງຈຳພຣະວິໄນແດ່ ເປັນພຣະທຳມະກະຖຶກແດ່ ເປັນຜູ້ຢູ່ປ່າເປັນຂໍ້ວັດແດ່ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດແດ່ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດແດ່ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດແດ່ ເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດແດ່ ເປັນຜູ້ງົດສັນອາຫານຄາບຫຼັງເປັນຂໍ້ວັດແດ່ ເປັນຜູ້ຖືການນັ່ງເປັນຂໍ້ວັດແດ່ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດແດ່ ເປັນຜູ້ໄດ້ປະຖົມຊານແດ່ ເປັນຜູ້ໄດ້ທຸຕິຍະຊານແດ່ ເປັນຜູ້ໄດ້ຕະຕິຍະຊານແດ່ ເປັນຜູ້ໄດ້ຈະຕຸດຖະຊານແດ່ ເປັນຜູ້ໄດ້ອາກາສານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ວິນຍານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດແດ່ ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແດ່ ໃນເບື້ອງຕົ້ນ ຄື ໃນເວລາທີ່ເປັນສະມະນະ ນີ້ຊື່ວ່າກຽດ ລວມຄວາມວ່າຍົດແລະກຽດໃນເບື້ອງຕົ້ນ

ຄຳວ່າ ຯລຯ ຂອງພິກຂຸນັ້ນເສື່ອມໄປ ອະທິບາຍວ່າ ຕໍ່ມາ ພິກຂຸບອກລາບຣະພຸດທະເຈົ້າ ພຣະທຳ ພຣະສົງ ສິກຂາ ກັບມາເປັນຄະລິຫັດ ຍົດແລະກຽດນັ້ນຂອງທ່ານ ຍ່ອມເສື່ອມໄປ ຄື ເສຍໄປ ສິ້ນໄປ ໝົດໄປ ສູນຫາຍ ສະຫຼາຍໄປ ລວມຄວາມວ່າ ຍົດແລະກຽດໃນເບື້ອງຕົ້ນຂອງພິກຂຸນັ້ນເສື່ອມໄປ

ຄຳວ່າ ນີ້ ໃນຄຳວ່າ ພິກຂຸເຫັນສົມບັດແລະວິບັດນີ້ແລ້ວ ເພິ່ງສຶກສາເພື່ອລະເມຖຸນທຳ ອະທິບາຍວ່າ ຍົດແລະກຽດໃນເບື້ອງຕົ້ນ ຄື ໃນເວລາທີ່ເປັນສະມະນະ ຄວາມເສື່ອມຍົດ ຄວາມເສື່ອມກຽດຂອງທ່ານ ຜູ້ບອກລາບຣະພຸດທະເຈົ້າ ພຣະທຳ ພຣະສົງ ສິກຂາ ກັບມາເປັນຄະລິຫັດໃນເວລາຕໍ່ມາ ຄື (ເຫັນ) ສົມບັດແລະວິບັດນີ້

ຄຳວ່າ ເຫັນແລ້ວ ໄດ້ແກ່ ແນມເຫັນແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ ລວມຄວາມວ່າ ເຫັນສົມບັດແລະວິບັດນີ້ແລ້ວ

## ວ່າດ້ວຍສິກຂາ ໓

ຄຳວ່າ ເພິ່ງສຶກສາ ໄດ້ແກ່ ສິກຂາ ໓ ຄື (໑) ອະທິສີລະສິກຂາ (໒) ອະທິຈິດຕະສິກຂາ (໓) ອະທິປັນຍາສິກຂາ

ອະທິສີລະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ສົມບູນດ້ວຍອາຈາຣະແລະໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍຢູ່ ຄື ສີນຂັນນ້ອຍ ສີນຂັນໃຫຍ່ ສີນເປັນບ່ອນເພິ່ງ ເປັນເບື້ອງຕົ້ນ ເປັນຄວາມປະພຶດ ເປັນຄວາມສັງລວມ ເປັນຄວາມຣະວັງ ເປັນຫົວໜ້າ ເປັນປະທານເພື່ອຄວາມເຖິງພ້ອມແຫ່ງທຳທີ່ເປັນກຸສົນ ນີ້ຊື່ວ່າອະທິສີລະສິກຂາ

ອະທິຈິດຕະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກການແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກ ອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານ ສະງົບຣະງັບໄປແລ້ວ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີ ວິຈານ ມີແຕ່ປີຕິແລະສຸກທີ່ເກີດຈາກສະມາທິຢູ່ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຊື່ວ່າອະທິຈິດຕະສິກຂາ

ອະທິປັນຍາສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາອັນປະເສີດ ຢັ່ງເຖິງຄວາມເກີດແລະຄວາມດັບ ເພີກຖອນກິເລດ ໃຫ້ບັນລຸເຖິງຄວາມສິ້ນທຸກໂດຍຊອບ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກຂະສະມຸໄທ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະຄາມິນີປະຕິ ປະທາ ທ່ານຮູ້ຕາມຄວາມເປັນຈິງວ່າ ເຫຼົ່ານີ້ອາສະວະ ທ່ານຮູ້ຕາມຄວາມເປັນ ຈິງວ່າ ນີ້ອາສະວະສະມຸໄທ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ອາສະວະນິໂຣທ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ອາສະວະນິໂຣທະຄາມິນີປະຕິປະທາ ນີ້ຊື່ວ່າອະທິປັນຍາສິກຂາ

ຄຳວ່າ ເມຖຸນທຳ ອະທິບາຍວ່າ ທຳນຽມຂອງອະສັດຕະບຸຣຸດ ຯລຯ ຊື່ວ່າເມຖຸນທຳ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ຄຳວ່າ ພິກຂຸເຫັນສົມບັດແລະວິບັດນີ້ແລ້ວ ເພິ່ງສຶກສາເພື່ອລະເມຖຸນທຳ ອະທິບາຍ ວ່າ ພິກຂຸເພິ່ງສຶກສາອະທິສີລະສິກຂາ ອະທິຈິດຕະສິກຂາ ອະທິປັນຍາສິກຂາ ເພື່ອລະ ຄື ເພື່ອສະງົບ ສະລັດຖິ້ມ ຣະງັບເມຖຸນທຳ

ສິກຂາ ໓ ເຫຼົ່ານີ້ ເມື່ອພິກຂຸນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຊື່ວ່າເພິ່ງສຶກສາ ເມື່ອເຫັນ ຊື່ວ່າເພິ່ງສຶກສາ ເມື່ອພິຈາລະນາ ຊື່ວ່າເພິ່ງສຶກສາ ເມື່ອອະທິຖານຈິດ ຊື່ວ່າເພິ່ງສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າເພິ່ງສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງສະຕິ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງໃຈໝັ້ນ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າ

ເພິ່ງສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າເພິ່ງສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າ ເພິ່ງສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າເພິ່ງສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ

ຊື່ວ່າ ເພິ່ງສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ພິກຂຸເຫັນສົມບັດແລະວິບັດນີ້ແລ້ວ ເພິ່ງສຶກສາເພື່ອລະເມຖຸນທຳ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຍົດແລະກຽດໃນເບື້ອງຕົ້ນຂອງພິກຂຸນັ້ນເສື່ອມໄປ
ພິກຂຸເຫັນສົມບັດແລະວິບັດນີ້ແລ້ວ ເພິ່ງສຶກສາເພື່ອລະເມຖຸນທຳ

[໕໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸນັ້ນ ຖືກຄວາມດຳຣິຄອບງຳ
ຍ່ອມຊຶບເຊົາເໝືອນຄົນກຳພ້າ
ເມື່ອໄດ້ຍິນຄຳຕຳໜິຂອງຄົນອື່ນແລ້ວ
ຍ່ອມເປັນຜູ້ເກີ້ເຂີນ ເປັນຜູ້ເຊັ່ນນັ້ນ
ວ່າດ້ວຍຂໍ້ເສຍຂອງພິກຂຸ

ຄຳວ່າ ພິກຂຸນັ້ນຖືກຄວາມດຳຣິຄອບງຳ ຍ່ອມຊຶບເຊົາເໝືອນຄົນກຳພ້າ ອະທິບາຍວ່າ ພິກຂຸນັ້ນ ຖືກຄວາມດຳຣິໃນກາມ ຄວາມດຳຣິໃນພະຍາບາດ ຄວາມດຳຣິໃນຄວາມບຽດບຽນກັນ ຄວາມດຳຣິຕາມທິດຖິ ກະທົບ ຄອບງຳ ຄື ກຸ້ມລຸມ ປະກອບ ຕົບແຕ່ງ ຍ່ອມຊຶບເຊົາ ຄື ຫງອຍເຫງົາ ເຊື່ອງຊຶມ ຊຶມເສົ້າ ເໝືອນຄົນກຳພ້າ ຄົນໂງ່ ຄົນລຸ້ມຫຼົງ ນົກເຄົ້າຈ້ອງຈັບໜູຢູ່ທີ່ງ່າໄມ້ ຍ່ອມຊຶບເຊົາ ຫງອຍເຫງົາ ເຊື່ອງຊຶມ ຊຶມເສົ້າ ສັນໃດ ໝາຈອກຄອຍຈ້ອງຫາປາຢູ່ທີ່ແຄມຝັ່ງແມ່ນ້ຳ ຍ່ອມຊຶບເຊົາ ຫງອຍເຫງົາ ເຊື່ອງຊຶມ ຊຶມເສົ້າ ສັນໃດ ແມວຄອຍຈ້ອງຈັບໜູຢູ່ຕາມຮອຍຕໍ່ ທີ່ທໍ່ນ້ຳ ແລະທີ່ຝັ່ງນ້ຳມີເປືອກຕົມ ຍ່ອມ ຊຶບເຊົາ ຫງອຍເຫງົາ ເຊື່ອງຊຶມ ຊຶມເສົ້າ ສັນໃດ ລາຫຼັງເປັນບາດ ຍ່ອມຊຶບເຊົາ ຫງອຍເຫງົາ ເຊື່ອງຊຶມ ຊຶມເສົ້າ ຢູ່ຕາມຮອຍຕໍ່ທີ່ທໍ່ນ້ຳ ແລະທີ່ຝັ່ງນ້ຳມີເປືອກຕົມ ສັນໃດ ພິກຂຸນັ້ນກໍສັນນັ້ນຄືກັນ ເມື່ອສິກແລ້ວຖືກຄວາມດຳຣິໃນກາມ ຄວາມດຳຣິໃນພະຍາບາດ ຄວາມດຳຣິໃນຄວາມບຽດບຽນກັນ ຄວາມດຳຣິຕາມທິດຖິ ກະທົບ ຄອບງຳ ຄື ກຸ້ມລຸມ ປະກອບ ຕົບແຕ່ງ ຍ່ອມຊຶບເຊົາ ຄື ຫງອຍເຫງົາ ເຊື່ອງຊຶມ ຊຶມເສົ້າ ເໝືອນຄົນກຳພ້າ ຄົນໂງ່ ຄົນລຸ້ມຫຼົງ ລວມຄວາມວ່າ ພິກຂຸນັ້ນຖືກຄວາມດຳຣິຄອບງຳ ຍ່ອມຊຶບເຊົາເໝືອນຄົນກຳພ້າ

ຄຳວ່າ ຂອງຄົນອື່ນ ໃນຄຳວ່າ ເມື່ອໄດ້ຍິນສຽງຕຳໜິຂອງຄົນອື່ນແລ້ວ ຍ່ອມເປັນຜູ້ເກີ້ເຂີນ ເປັນຜູ້ເຊັ່ນນັ້ນ ອະທິບາຍວ່າ ອຸປັດຊາ ອາຈານ ຜູ້ຮ່ວມອຸປັດຊາ ຜູ້ຮ່ວມອາຈານ ມິດເພື່ອນເຫັນ ເພື່ອນຄົບ ຫຼືສະຫາຍ ຕຳໜິວ່າ ຜູ້ມີອາຍຸ ບໍ່ແມ່ນລາບຂອງທ່ານເລີຍ ທ່ານເອົາດີໄດ້

ຍາກ ທີ່ໄດ້ສາດສະດາສູງສົ່ງເຫັນປານນີ້ ບວດໃນທຳວິໄນທີ່ພຣະສາດສະດາຕັດໄວ້ດີແລ້ວແນວນີ້ ໄດ້ໝູ່ຄະນະທີ່ປະເສີດແນວນີ້ ຍ້ອນເຫດແຫ່ງເມຖຸນທຳ ອັນຊົ່ວ ກໍບອກລາບຣະພຸດທະເຈົ້າ ພຣະທຳ ພຣະສົງ ສິກຂາ ກັບມາເປັນຄະລິຫັດ ທ່ານບໍ່ມີສັດທາໃນກຸສົນທຳ ບໍ່ມີຫິຣິໃນກຸສົນທຳ ບໍ່ມີໂອດຕັບປະໃນກຸສົນທຳ ບໍ່ມີວິຣິຍະໃນກຸສົນທຳ ບໍ່ມີສະຕິໃນກຸສົນທຳ ບໍ່ມີປັນຍາໃນກຸສົນທຳ ທ່ານ ເມື່ອໄດ້ຍິນ ຄື ໄດ້ຟັງ ຕັ້ງໃຈຮູ້ ພິຈາລະນາ ກຳນົດເຊິ່ງຄຳ ຄື ຄຳທີ່ເປັນແນວທາງ ເຫດສະໜາ ຄຳສັ່ງສອນ ຄຳພ່ຳສອນ ຂອງຄົນເຫຼົ່ານັ້ນແລ້ວ ຍ່ອມເປັນຜູ້ເກີ້ເຂີນ ຄື ຂວຍເຂີນ ອຶດອັດ ກະດາກໃຈ ເສຍໃຈ

ຄຳວ່າ ເປັນຜູ້ເຊັ່ນນັ້ນ ໄດ້ແກ່ ພິກຂຸນັ້ນ ເມື່ອສຶກແລ້ວເປັນຜູ້ເຊັ່ນນັ້ນ ຄືເປັນຜູ້ແນວນັ້ນ ຜູ້ດຳຣົງແນວນັ້ນ ຜູ້ເປັນປະການນັ້ນ ຜູ້ມີສ່ວນແນວນັ້ນ ລວມຄວາມວ່າ ເມື່ອໄດ້ຍິນຄຳຕຳໜິຂອງຄົນອື່ນແລ້ວ ຍ່ອມເປັນຜູ້ເກີ້ເຂີນ ເປັນຜູ້ເຊັ່ນນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະ ພາກເຈົ້າຈຶ່ງຕັດວ່າ

ພິກຂຸນັ້ນ ຖືກຄວາມດຳຣິຄອບງຳ
ຍ່ອມຊຶບເຊົາເໝືອນຄົນກຳພ້າ
ເມື່ອໄດ້ຍິນຄຳຕຳໜິຂອງຄົນອື່ນແລ້ວ
ຍ່ອມເປັນຜູ້ເກີ້ເຂີນ ເປັນຜູ້ເຊັ່ນນັ້ນ

[໕໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ລຳດັບນັ້ນ ພິກຂຸນັ້ນຖືກຄຳເວົ້າຂອງຄົນອື່ນຕັກເຕືອນແລ້ວ
ຍ່ອມສ້າງອາວຸດ ທ່ານຍ່ອມກ້າວລົງສູ່ຄວາມເປັນຄົນເວົ້າຕົວະ
ນີ້ແລເປັນເຄື່ອງເຮັດໃຫ້ຕິດໃຫຍ່ຂອງທ່ານ

ຄຳວ່າ ລຳດັບນັ້ນ ໃນຄຳວ່າ ລຳດັບນັ້ນ ພິກຂຸນັ້ນຖືກຄຳເວົ້າຂອງຄົນອື່ນຕັກເຕືອນແລ້ວ ຍ່ອມສ້າງອາວຸດ ເປັນບົດສົນທິ ເປັນຄຳເຊື່ອມບົດ ເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ລຳດັບນັ້ນ ນີ້ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

## ວ່າດ້ວຍອາວຸດ ໓ ຢ່າງ

ຄຳວ່າ ອາວຸດ ໄດ້ແກ່ ອາວຸດ ໓ ຢ່າງ ຄື (໑) ອາວຸດທາງກາຍ (໒) ອາວຸດທາງວາຈາ (໓) ອາວຸດທາງໃຈ ກາຍທຸດຈະຣິດ ໓ ຢ່າງ ຊື່ວ່າອາວຸດທາງກາຍ ວະຈີທຸດຈະຣິດ ໔ ຢ່າງ ຊື່ວ່າອາວຸດທາງວາຈາ ມະໂນທຸດຈະຣິດ ໓ ຢ່າງ ຊື່ວ່າ ອາວຸດທາງໃຈ

ຄຳວ່າ ຖືກຄຳເວົ້າຂອງຄົນອື່ນຕັກເຕືອນແລ້ວ ອະທິບາຍວ່າ ຖືກອຸປັດຊາ ອາຈານ ຜູ້ຮ່ວມອຸປັດຊາ ຜູ້ຮ່ວມອາຈານ ມິດ ເພື່ອນເຫັນ ເພື່ອນຄົບ ຫຼື ສະຫາຍຕັກເຕືອນ ກໍເວົ້າຕົວະທັງຮູ້ຢູ່ ຄື ເວົ້າວ່າ ທ່ານຜູ້ຈະເລີນ ຂ້ານ້ອຍຍິນດີໃນການບວດຢູ່ແລ້ວ ແຕ່ຂ້ານ້ອຍຕ້ອງລ້ຽງດູມານດາ ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງສິກ ເວົ້າວ່າ ຂ້ານ້ອຍຕ້ອງລ້ຽງດູບິດາ ຯລຯ ຕ້ອງລ້ຽງດູອ້າຍນ້ອງຊາຍ ຯລຯ ຕ້ອງລ້ຽງດູເອື້ອຍນ້ອງສາວ ຯລຯ ຕ້ອງລ້ຽງດູບຸດ ຯລຯ ຕ້ອງລ້ຽງດູທິດາ ຯລຯ ຕ້ອງລ້ຽງດູມິດ ຯລຯ ຕ້ອງລ້ຽງດູອຳມາດ ຯລຯ ຕ້ອງລ້ຽງດູຍາດ ເວົ້າວ່າ ຂ້ານ້ອຍຕ້ອງລ້ຽງດູຜູ້ຮ່ວມສາຍໂລຫິດ ດ້ວຍເຫດນັ້ນ ຂ້ານ້ອຍຈຶ່ງສິກ ຍ່ອມສ້າງ ຄື ສ້າງຂຶ້ນ ໃຫ້ເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນເຊິ່ງອາວຸດທາງວາຈາດັ່ງວ່າມານີ້ ລວມຄວາມວ່າ ລຳດັບນັ້ນພິກຂຸນັ້ນຖືກຄຳເວົ້າຂອງຄົນອື່ນຕັກເຕືອນແລ້ວ ຍ່ອມສ້າງອາວຸດ

ຄຳວ່າ ນີ້ແລເປັນເຄື່ອງເຮັດໃຫ້ຕິດໃຫຍ່ຂອງທ່ານ ອະທິບາຍວ່າ ການກ່າວຕົວະ ທັງທີ່ຮູ້ຢູ່ເປັນເຄື່ອງເຮັດໃຫ້ຕິດໃຫຍ່ ຄື ເປັນປ່າໃຫຍ່ ເປັນດົງໃຫຍ່ ເປັນທາງກັນດານໃຫຍ່ ເປັນຄືທາງຂຸຂະຫຼາຍ ເປັນທາງຄົດຫຼາຍ ເປັນຄືຫຼົ່ມໃຫຍ່ ເປັນຄືຂຸມໃຫຍ່ ເປັນຄວາມກັງວົນຫຼາຍແທ້ ເປັນເຄື່ອງຜູກພັນໃຫຍ່ຂອງທ່ານ ລວມຄວາມວ່າ ນີ້ແລເປັນເຄື່ອງເຮັດໃຫ້ຕິດໃຫຍ່ຂອງທ່ານ

## ວ່າດ້ວຍມຸສາວາດ

ຄຳວ່າ ຍ່ອມກ້າວລົງສູ່ຄວາມເປັນຄົນເວົ້າຕົວະ ອະທິບາຍວ່າ ມຸສາວາດ ຕັດຮຽກວ່າຄວາມເປັນຄົນເວົ້າຕົວະ ຄົນບາງຄົນໃນໂລກນີ້ ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງ ໝູ່ຍາດຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ ບຸກຄົນນັ້ນບໍ່ຮູ້ກໍເວົ້າວ່າ ຮູ້ ຫຼື ຮູ້ກໍເວົ້າວ່າ ບໍ່ຮູ້ ບໍ່ເຫັນກໍເວົ້າວ່າເຫັນ ຫຼືເຫັນກໍເວົ້າວ່າ ບໍ່ເຫັນ ເຂົາເວົ້າຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່ ດ້ວຍປະການແນວນີ້ ນີ້ຕັດຮຽກວ່າ ຄວາມເປັນຄົນເວົ້າຕົວະ

ອີກໄນໜຶ່ງ ມຸສາວາດມີໄດ້ດ້ວຍອາການ ໓ ຢ່າງ ຄື

໑. ກ່ອນເວົ້າທ່ານກໍຮູ້ວ່າ ເຮົາຈັກເວົ້າຕົວະ
໒. ກຳລັງເວົ້າກໍຮູ້ວ່າ ເຮົາກຳລັງເວົ້າຕົວະ
໓. ເວົ້າແລ້ວກໍຮູ້ວ່າ ເຮົາເວົ້າຕົວະແລ້ວ

ມຸສາວາດມີໄດ້ດ້ວຍອາການ ໓ ຢ່າງເຫຼົ່ານີ້

ອີກໄນໜຶ່ງ ມຸສາວາດມີໄດ້ດ້ວຍອາການ ໔ ຢ່າງ ຯລຯ ດ້ວຍອາການ ໕ ຢ່າງ ຯລຯ ດ້ວຍອາການ ໖ ຢ່າງ ຯລຯ ດ້ວຍອາການ ໗ ຢ່າງ ຯລຯ

ມຸສາວາດມີໄດ້ດ້ວຍອາການ ໘ ຢ່າງ ຄື

໑. ກ່ອນເວົ້າທ່ານກໍຮູ້ຢູ່ວ່າ ເຮົາຈັກເວົ້າຕົວະ
໒. ກຳລັງເວົ້າກໍຮູ້ວ່າ ເຮົາກຳລັງເວົ້າຕົວະ
໓. ເວົ້າແລ້ວກໍຮູ້ວ່າ ເຮົາເວົ້າຕົວະແລ້ວ
໔. ປິດບັງທິດຖິ
໕. ປິດບັງຄວາມພໍໃຈ
໖. ປິດບັງຄວາມຖືກໃຈ
໗. ປິດບັງຄວາມສຳຄັນ
໘. ປິດບັງຄວາມຈິງ

ມຸສາວາດມີໄດ້ດ້ວຍອາການ ໘ ຢ່າງເຫຼົ່ານີ້

ຄຳວ່າ ຍ່ອມກ້າວລົງສູ່ຄວາມເປັນຄົນເວົ້າຕົວະ ໄດ້ແກ່ ຍ່ອມກ້າວລົງ ຄື ຍ່ອມຢັ່ງລົງ ຢັ່ງລົງສະເພາະ ເຂົ້າເຖິງຄວາມເປັນຄົນເວົ້າຕົວະ ລວມຄວາມວ່າ ຍ່ອມກ້າວລົງສູ່ຄວາມເປັນຄົນເວົ້າຕົວະ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ລຳດັບນັ້ນ ພິກຂຸນັ້ນຖືກຄຳເວົ້າຂອງຄົນອື່ນຕັກເຕືອນແລ້ວ
ຍ່ອມສ້າງອາວຸດ ທ່ານຍ່ອມກ້າວລົງສູ່ຄວາມເປັນຄົນເວົ້າຕົວະ
ນີ້ແລເປັນເຄື່ອງເຮັດໃຫ້ຕິດໃຫຍ່ຂອງທ່ານ

[໕໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸ (ໃນເບື້ອງຕົ້ນ) ໄດ້ສົມຍານາມວ່າ ເປັນບັນດິດ
ອະທິຖານການທ່ຽວໄປຜູ້ດຽວ
ຕໍ່ມາ ທ່ານປະກອບໃນເມຖຸນທຳ
ກໍຈັກມົວໝອງ ເໝືອນກັບຄົນໂງ່ ສັນນັ້ນ

## ວ່າດ້ວຍຕົ້ນຊື່ປາຍຄົດ

ຄຳວ່າ ພິກຂຸ (ໃນເບື້ອງຕົ້ນ) ໄດ້ສົມຍານາມວ່າ ເປັນບັນດິດ ອະທິບາຍວ່າ ພິກຂຸບາງອົງໃນທຳວິໄນນີ້ ໄດ້ຮັບການສັນເສີນກຽດຕິຄຸນວ່າ ເປັນບັນດິດ ຄື ເປັນຜູ້ສະຫຼາດ ມີປັນຍາ ເປັນພະຫູສູດ ມີຄຳເວົ້າມ່ວນ ມີປະຕິພານດີ ເປັນຜູ້ຊົງຈຳພຣະສູດແດ່ ເປັນຜູ້ຊົງຈຳພຣະວິໄນແດ່ ເປັນພຣະທຳມະກະຖຶກແດ່ ຯລຯ ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແດ່ ໃນເບື້ອງຕົ້ນ ຄື ໃນເວລາທີ່ເປັນສະມະນະ ເຊິ່ງຜູ້ຄົນຮູ້ຈັກກັນ ຮູ້ຈັກກັນທົ່ວ ຊື່ວ່າໄດ້ສົມຍານາມແນວນີ້ ລວມຄວາມວ່າ ພິກຂຸ (ໃນເບື້ອງຕົ້ນ) ໄດ້ສົມຍານາມວ່າ ເປັນບັນດິດ

ຄຳວ່າ ອະທິຖານການທ່ຽວໄປຜູ້ດຽວ ອະທິບາຍວ່າ ໄດ້ອະທິຖານການທ່ຽວໄປຜູ້ດຽວດ້ວຍເຫດ ໔ ປະການ ຄື

໑. ດ້ວຍການບວດ

໔. ດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະ

ພິກຂຸອະທິຖານການທ່ຽວໄປຜູ້ດຽວດ້ວຍການບວດ ເປັນແນວໃດ?

ຄື ພິກຂຸຕັດຄວາມກັງວົນເລື້ອງການຄອງເຮືອນທັງໝົດ ຯລຯ ພິກຂຸອະທິຖານການທ່ຽວໄປຜູ້ດຽວດ້ວຍການບວດ ເປັນແນວນີ້

ພິກຂຸ ອະທິຖານການທ່ຽວໄປຜູ້ດຽວ ດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະເປັນແນວໃດ?

ຄື ພິກຂຸນັ້ນ ເມື່ອເປັນນັກບວດແລ້ວແນວນີ້ຜູ້ດຽວ ກໍໃຊ້ສອຍເສນາສະນະທີ່ເປັນປ່າ ເລົ່າ ແລະປ່າທຶບ ອັນສະຫງັດ ຯລຯ ພິກຂຸອະທິຖານການທ່ຽວໄປຜູ້ດຽວດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະ ເປັນແນວນີ້ ລວມຄວາມວ່າ ອະທິຖານການທ່ຽວໄປຜູ້ດຽວ

ຄຳວ່າ ຕໍ່ມາ ທ່ານປະກອບໃນເມຖຸນທຳ ອະທິບາຍວ່າ ທຳນຽມຂອງອະສັດຕະບຸຣຸດ ຄື ທຳນຽມຂອງຊາວບ້ານ ຯລຯ ຊື່ວ່າເມຖຸນທຳ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ຄຳວ່າ ຕໍ່ມາ ທ່ານປະກອບໃນເມຖຸນທຳ ອະທິບາຍວ່າ ຕໍ່ມາ ທ່ານກໍບອກລາບຣະ ພຸດທະເຈົ້າ ພຣະທຳ ພຣະສົງ ສິກຂາ ກັບມາເປັນຄະລຶຫັດ ປະກອບ ຄື ປະກອບທົ່ວ ປະກອບທົ່ວເຖິງ ປະກອບພ້ອມໃນເມຖຸນທຳ ລວມຄວາມວ່າ ຕໍ່ມາ ທ່ານປະກອບໃນເມ ຖຸນທຳ

## ວ່າດ້ວຍການລົງໂທດ

ຄຳວ່າ ກໍຈັກມົວໝອງ ເໝືອນກັບຄົນໂງ່ ສະນັ້ນ ອະທິບາຍວ່າ ຈັກລຳບາກ ຈັກມົວໝອງ ຄື ເສົ້າໝອງ ເໝືອນຄົນກຳພ້າ ຄົນໂງ່ ຄົນລຸ້ມຫຼົງ ຄື ຂ້າສັດແດ່ ລັກຊັບແດ່ ຕັດປ່ອງຍ່ອງເບົາແດ່ ຂະໂມຍຍົກເຄົ້າແດ່ ປຸ້ນບ້ານແດ່ ດັກຈີ້ໃນທາງປຽວແດ່ ລະເມີດພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ຈັກລຳບາກ ຈັກມົວໝອງ ຄື ເສົ້າໝອງ ແມ່ນແນວນີ້ ພຣະຣາຊາກໍຮັບສັ່ງໃຫ້ຈັບເຂົາລົງອາຍາດ້ວຍປະການຕ່າງ ໆ ຄື ໃຫ້ຄຸ້ງບດ້ວຍແສ້ແດ່ ໃຫ້ຄຸ້ງບດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ຄ້ອນແດ່ ຕັດມືແດ່ ຕັດຕີແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ລອກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຢັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນຕົວຮົດນ້ຳມັນແລ້ວຈຸດໄຟເຜົາແດ່ ພັນມືແລ້ວຈຸດໄຟຕ່າງທວນໄຟແດ່ ລອກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ລອກໜັງຕັ້ງແຕ່ຄໍເຖິງບັ້ນແອວ ເຮັດໃຫ້ແນມເບິ່ງເໝືອນນຸ່ງຜ້າຄາກອງແດ່ ສວມປອກເຫຼັກທີ່ແຂນສອກ ແລະເຂົ່າແລ້ວສຽບຫຼາວທັງຫ້າທິດເອົາໄຟເຜົາແດ່ ໃຊ້ເບັດກ່ຽວ ໜັງເນື້ອເອັນອອກ

ມາແດ່ ປາດຊີ້ນອອກເປັນຕ່ອນ ໆ ເໝືອນຫຼຽນກະສາບແດ່ ປາດໜັງ ຊີ້ນ ເອັນ ອອກ ເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຊ່ອງຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາ ປິ່ນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວ ລອກໜັງອອກເຫຼືອໄວ້ແຕ່ກອງຊີ້ນ ເໝືອນຕັ່ງໃບໄມ້ແດ່ ຮົດຕົວດ້ວຍນ້ຳມັນທີ່ກຳລັງເດືອດພ່ານແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ຕັດຫົວອອກດ້ວຍດາບແດ່ ທ່ານຈັກລຳບາກ ຈັກມົວໝອງ ຄື ເສົ້າໝອງ ແນວນີ້ແດ່

ອີກໄນໜຶ່ງ ທ່ານຖືກການຕັນຫາຄອບງຳ ຖືກການຕັນຫາຕຶງໃຈໄວ້ແລ້ວ ເມື່ອຈະສະແຫວງຫາໂພຄະຊັບ ກໍຕ້ອງແລ່ນເຮືອອອກໄປສູ່ມະຫາສະມຸດ ຜ່າໜາວ ຜ່າຮ້ອນ ຖືກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານບຽດບຽນເອົາແດ່ ຖືກຄວາມຫິວກະຫາຍກົດດັນຢູ່ ກໍຕ້ອງເດີນທາງໄປຄຸມພຣັດ ຕັກໂກລະຣັດ (ຕະກົ່ວປ່າ) ຕັກກະສິນຣັດ ກາລະມຸຂະຣັດ ປຸຣະຣັດ ເວສຸງຄະຣັດ ເວຣາປະຖະຣັດ ຊະວາຣັດ ຕາມະລິງຣັດ (ນະຄອນສະຣີທຳມະຣາດ) ວັງຄະຣັດ ເອລະພັນທະນະຣັດ ສຸວັນນະກູຕະຣັດ ສຸວັນນະພູມຣັດ ຕັມພະປານີຣັດ ສຸບປາທະກະຣັດ ເພຣຸກັດສະຣັດ ສຸຣັດຖະຣັດ ພັງຄະໂລກະຣັດ ພັງຄະນະຣັດ ປະຣະມະພັງຄະນະຣັດ ໂຍນະຣັດ ປີນະຣັດ ວິນະກະຣັດ ມູລະປະທະຣັດ ເດີນທາງໄປສູ່ທະເລຊາຍທີ່ຕ້ອງໝາຍດ້ວຍດາວຄານໄປດ້ວຍເຂົ່າ ເດີນທາງດ້ວຍແບ້ ເດີນທາງດ້ວຍແກະ ໄປດ້ວຍການຕອກຫຼັກຜູກເຊືອກໂຫນໄປ ໄປດ້ວຍຮົ່ມ ເດີນທາງດ້ວຍການຕັດໄມ້ໄຜ່ເຮັດພະອົງສຳລັບປີນ ເດີນທາງ ຢ່າງນົກເດີນທາງຢ່າງໜູ ໄປຕາມຮ່ອມພູ ໄຕ່ໄປຕາມເຄືອຫວາຍ ທ່ານກໍຈັກລຳບາກ ຈັກມົວໝອງ ຄື ເສົ້າໝອງ ແນວນີ້ແດ່

ເມື່ອສະແຫວງຫາບໍ່ໄດ້ກໍຕ້ອງສະເຫວີຍທຸກ ແລະໂທມະນັດທີ່ມີການບໍ່ໄດ້ເປັນຕົ້ນເຫດ ທ່ານກໍຈັກລຳບາກ ຈັກມົວໝອງ ຄື ເສົ້າໝອງ ແນວນີ້ແດ່

ທ່ານ ເມື່ອສະແຫວງຫາໄດ້ມາ ແລະເມື່ອໄດ້ແລ້ວ ກໍຍັງຕ້ອງສະເຫວີຍທຸກແລະໂທມະນັດທີ່ມີການຕ້ອງຮັກສາເປັນມູນເຫດແດ່ ດ້ວຍຄວາມຫວາດຫວັ່ນວ່າ ເຮັດຈັ່ງໃດນໍ ພຣະຣາຊາຈະບໍ່ເພິ່ງຢຶດໂພຄະຊັບຂອງເຮົາ ໂຈນຈະບໍ່ເພິ່ງປຸ້ນ ໄຟຈະບໍ່ເພິ່ງໄໝ້ ນ້ຳຈະບໍ່ເພິ່ງພັດພາໄປ ທາຍາດທີ່ບໍ່ເປັນທີ່ຮັກຈະບໍ່ເພິ່ງລັກເອົາໄປ ເມື່ອຮັກສາຄຸ້ມຄອງຢູ່ແບບນີ້ ໂພຄະຊັບ ຍ່ອມເສື່ອມຄ່າລົງ ທ່ານຕ້ອງສະເຫວີຍທຸກແລະໂທມະນັດ ທີ່ມີຄວາມພັດພາກເປັນມູນ ກໍຈັກລຳບາກ ຈັກມົວໝອງ ຄື ເສົ້າໝອງ ແນວນີ້ແດ່ ລວມຄວາມວ່າ ຕໍ່ມາ ທ່ານປະກອບໃນເມຖຸນທຳ ກໍຈັກມົວໝອງ ເໝືອນກັບຄົນໂງ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ພິກຂຸ (ໃນເບື້ອງຕົ້ນ) ໄດ້ສົມຍານາມວ່າ ເປັນບັນດິດ
ອະທິຖານການທ່ຽວໄປຜູ້ດຽວ
ຕໍ່ມາ ທ່ານປະກອບໃນເມຖຸນທຳ
ກໍຈັກມົວໝອງ ເໝືອນກັບຄົນໂງ່

[໕໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີຮູ້ໂທດນີ້ແລ້ວ ໃນເວລາເປັນຄະລືຫັດກ່ອນບວດໃນທຳວິໄນນີ້
ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງ ບໍ່ເພິ່ງເຂົ້າໄປເສບເມຖຸນທຳ

## ວ່າດ້ວຍປະຕິປະທາຂອງມຸນີ

ຄຳວ່າ ນີ້ ໃນຄຳວ່າ ມຸນີຮູ້ໂທດນີ້ແລ້ວ ໃນເວລາເປັນຄະລືຫັດກ່ອນບວດໃນທຳວິໄນນີ້ ອະທິບາຍວ່າ ຍຶດ ແລະກຽດ ໃນເບື້ອງຕົ້ນ ຄື ໃນເວລາທີ່ເປັນສະມະນະ ຄວາມເສື່ອມຍົດ ຄວາມເສື່ອມກຽດ ຂອງທ່ານຜູ້ບອກລາບຣະພຸດທະເຈົ້າ ພຣະທຳ ພຣະສົງ ສິກຂາ ກັບມາເປັນຄະລືຫັດໃນເວລາຕໍ່ມາ ຄື (ຮູ້) ວິບັດແຫ່ງສົມບັດນີ້

ຄຳວ່າ ຮູ້ແລ້ວ ໄດ້ແກ່ ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ໃນທຳວິໄນນີ້ ໄດ້ແກ່ ໃນທິດຖີນີ້ ໃນຄວາມຖືກໃຈນີ້ ຄວາມພໍໃຈນີ້ ຄວາມຍຶດຖືນີ້ ທຳນີ້ ວິໄນນີ້ ທຳວິໄນນີ້ ປາພົດນີ້ ພົມມະຈັນນີ້ ສັດຖຸສາດນີ້ ອັດຕະພາບນີ້ ມະນຸດໂລກນີ້ ລວມຄວາມວ່າ ມຸນີຮູ້ໂທດນີ້ແລ້ວ ໃນເວລາເປັນຄະລືຫັດກ່ອນບວດໃນທຳວິໄນນີ້

ຄຳວ່າ ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງ ອະທິບາຍວ່າ ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງດ້ວຍເຫດ ໒ ຢ່າງ ຄື

໑. ດ້ວຍການບວດ
໒. ດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະ

ມຸນີເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງດ້ວຍການບວດ ເປັນແນວໃດ?

ຄື ມຸນີຕັດຄວາມກັງວົນເລື້ອງການຄອງເຮືອນ ຕັດຄວາມກັງວົນເລື້ອງບຸດພັນລະຍາ ຕັດຄວາມກັງວົນເລື້ອງຍາດ ຕັດຄວາມກັງວົນເລື້ອງມິດແລະອຳມາດ ຕັດຄວາມກັງວົນເລື້ອງການສະສົມທັງໝົດ ແຖຜົມແລະໜວດແລ້ວ ນຸ່ງຫົ່ມຜ້າກາສາວະ ອອກຈາກເຮືອນບວດເປັນບັນພະຊິດ ເຂົ້າເຖິງຄວາມບໍ່ກັງວົນແລ້ວ ເພິ່ງທ່ຽວໄປຜູ້ດຽວ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ມຸນີ ຊື່ວ່າເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງດ້ວຍການບວດ ເປັນແນວນີ້

ມຸນີເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະເປັນແນວໃດ?

ຄື ມຸນີນັ້ນ ເມື່ອເປັນນັກບວດແລ້ວແນວນີ້ຜູ້ດຽວ ເພິ່ງໃຊ້ສອຍເສນາສະນະທີ່ເປັນປ່າເລົ່າ ແລະປ່າທຶບອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການ ສັນຈອນ ໄປມາ ຂອງຜູ້ຄົນ ຄວນເປັນສະຖານທີ່ເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ທ່ານຍ່າງອົງ ດຽວ ຢືນອົງດຽວ ນັ່ງອົງດຽວ ນອນອົງດຽວ ເຂົ້າໝູ່ບ້ານເພື່ອບິນທະບາດອົງດຽວ ກັບມາອົງດຽວ ນັ່ງໃນບ່ອນລັບອົງດຽວ ອະທິຖານຈົງກົມອົງດຽວ ເພິ່ງທ່ຽວໄປຜູ້ດຽວ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ມຸນີ ຊື່ວ່າເພິ່ງ ທຳການທ່ຽວໄປຜູ້ດຽວໃຫ້ ໝັ້ນຄົງດ້ວຍການລະຄວາມຄຸກຄີດ້ວຍໝູ່ຄະນະ ເປັນແນວນີ້

ຄຳວ່າ ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງ ໄດ້ແກ່ ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ ໝັ້ນຄົງ ຄື ເພິ່ງເຮັດໃຫ້ຍັ່ງຍືນ ມີການສະມາທານໝັ້ນຄົງ ມີການສະມາທານບໍ່ຄອນແຄນໃນ ກຸສົນທຳທັງຫຼາຍ ລວມຄວາມວ່າ ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງ

ຄຳວ່າ ບໍ່ເພິ່ງເຂົ້າໄປເສບເມຖຸນທຳ ອະທິບາຍວ່າ ທຳນຽມຂອງອະສັດຕະບຸຣຸດ ຄື ທຳນຽມຂອງຊາວບ້ານ ຯລຯ ຊື່ວ່າເມຖຸນທຳ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ ມຸນີ ບໍ່ ເພິ່ງເສບ ຄື ບໍ່ເພິ່ງເສບເປັນນິດ ບໍ່ເພິ່ງຊ່ອງເສບ ບໍ່ເພິ່ງເສບສະເພາະ ບໍ່ເພິ່ງປະພຶດ ບໍ່ເພິ່ງ ປະພຶດໂດຍເອື້ອເຟື້ອ ບໍ່ເພິ່ງສະມາທານປະພຶດເຊິ່ງເມຖຸນທຳ ລວມຄວາມວ່າ ບໍ່ເພິ່ງເຂົ້າໄປ ເສບເມຖຸນທຳ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີຮູ້ໂທດນີ້ແລ້ວ ໃນເວລາເປັນຄະລຶຫັດກ່ອນບວດໃນທຳວິໄນນີ້
ເພິ່ງທຳການທ່ຽວໄປຜູ້ດຽວໃຫ້ໝັ້ນຄົງ ບໍ່ເພິ່ງເຂົ້າໄປເສບເມຖຸນທຳ

[໕໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນເພິ່ງສຶກສາວິເວກນັ້ນ ຍ້ອນການປະພຶດວິເວກນີ້
ເປັນກິດສູງສຸດຂອງພຣະອະຣິຍະທັງຫຼາຍ
ບໍ່ເພິ່ງສຳຄັນຕົນວ່າ ເຮົາເປັນຜູ້ປະເສີດສຸດດ້ວຍການປະພຶດວິເວກນັ້ນ
ຜູ້ນັ້ນແລ ຊື່ວ່າຢູ່ໃກ້ນິບພານ

ຄຳວ່າ ວິເວກ ໃນຄຳວ່າ ເພິ່ງສຶກສາວິເວກນັ້ນແລ ໄດ້ແກ່ ວິເວກ ໓ ຢ່າງ ຄື

໑. ກາຍວິເວກ
໒. ຈິດຕະວິເວກ
໓. ອຸປະທິວິເວກ

ກາຍວິເວກ ເປັນແນວໃດ? ຯລຯ ນີ້ຊື່ວ່າ ອຸປະທິວິເວກ

ກາຍວິເວກ ຍ່ອມມີແກ່ບຸກຄົນຜູ້ມີກາຍຫຼີກອອກແລ້ວ ຍິນດີຍິ່ງໃນເນກຂໍາມະ ຈິດຕະວິເວກ ຍ່ອມມີແກ່ບຸກຄົນຜູ້ມີຈິດບໍລິສຸດ ເຖິງຄວາມເປັນຜູ້ຜ່ອງແຜ້ວຍິ່ງ ແລະອຸປະທິວິເວກຍ່ອມມີແກ່ບຸກຄົນຜູ້ປາສະຈາກອຸປະທິ ບັນລຸນິບພານອັນປາສະຈາກປັດໄຈປຸງແຕ່ງ

ຄໍາວ່າ ສຶກສາ ໄດ້ແກ່ ສິກຂາ ໓ ຄື

໑. ອະທິສິລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ ຯລຯ ນີ້ຊື່ວ່າອະທິປັນຍາສິກຂາ

ຄໍາວ່າ ເພິ່ງສຶກສາວິເວກນັ້ນແລ ໄດ້ແກ່ ເພິ່ງສຶກສາ ຄື ເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດວິເວກນັ້ນແລ ລວມຄວາມວ່າ ເພິ່ງສຶກສາ ວິເວກນັ້ນແລ

ຄໍາວ່າ ຍ້ອນການປະພຶດວິເວກນີ້ ເປັນກິດສູງສຸດຂອງພຣະອະຣິຍະທັງຫຼາຍ ອະທິ ບາຍວ່າ ພຣະພຸດທະເຈົ້າ ພຣະພຸດທະສາວົກ ແລະພຣະປັດເຈກພຸດທະເຈົ້າທັງຫຼາຍ ຕັດຮຽກ ວ່າພຣະອະຣິຍະ ການປະພຶດວິເວກ ເປັນກິດຍອດຢ້ຽມ ປະເສີດ ວິເສດ ນໍາໜ້າ ສູງສຸດ ປະເສີດສຸດ ຂອງພຣະອະຣິຍະທັງຫຼາຍ ລວມຄວາມວ່າ ຍ້ອນການປະພຶດວິເວກນີ້ ເປັນກິດສູງສຸດຂອງພຣະອະຣິຍະທັງຫຼາຍ

ຄໍາວ່າ ບໍ່ເພິ່ງສໍາຄັນຕົນວ່າ ເຮົາເປັນຜູ້ປະເສີດສຸດດ້ວຍການປະພຶດວິເວກນັ້ນ ອະທິບາຍວ່າ ບໍ່ເພິ່ງທໍາການຍົກຕົນ ບໍ່ເພິ່ງທໍາການອວດຕົນ ບໍ່ເພິ່ງທໍາການຖືຕົວ ບໍ່ເພິ່ງເຮັດຄວາມແຂງກ້າວ ບໍ່ເພິ່ງເຮັດຄວາມກະດ້າງ ດ້ວຍການປະພຶດວິເວກນັ້ນ ຄື ບໍ່ເພິ່ງໃຫ້ເກີດຄວາມຖືຕົວ ບໍ່ເພິ່ງເຮັດຄວາມຜູກພັນ ດ້ວຍການປະພຶດວິເວກນັ້ນ ໄດ້ແກ່ ບໍ່ຄວນເປັນຄົນແຂງກະດ້າງ ເປັນຄົນຈອງຫອງ ເປັນຄົນຫົວສູງ ດ້ວຍການປະພຶດວິເວກນັ້ນ ລວມຄວາມວ່າ ບໍ່ເພິ່ງສໍາຄັນຕົນວ່າ ເຮົາເປັນຜູ້ປະເສີດສຸດດ້ວຍການປະພຶດວິເວກນັ້ນ

ຄໍາວ່າ ຜູ້ນັ້ນແລ ຊື່ວ່າຢູ່ໃກ້ນິບພານ ອະທິບາຍວ່າ ຜູ້ນັ້ນ ຢູ່ໃກ້ ຄື ຢູ່ໃກ້ຊິດ ຢູ່ໃກ້ຄຽງຢູ່ບໍ່ໄກ ເຂົ້າໄປໃກ້ນິບພານ ລວມຄວາມວ່າ ຜູ້ນັ້ນແລ ຊື່ວ່າຢູ່ໃກ້ ນິບພານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນເພິ່ງສຶກສາວິເວກນັ້ນແລ ຍ້ອນການປະພຶດວິເວກນີ້
ເປັນກິດສູງສຸດຂອງພຣະອະຣິຍະທັງຫຼາຍ
ບໍ່ເພິ່ງສໍາຄັນຕົນວ່າ ເຮົາເປັນຜູ້ປະເສີດສຸດດ້ວຍການປະພຶດວິເວກນັ້ນ
ຜູ້ນັ້ນແລ ຊື່ວ່າຢູ່ໃກ້ນິບພານ

[໕໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ໝູ່ສັດຜູ້ຕິດໃຈໃນກາມທັງຫຼາຍ ຍ່ອມຍິນດີມຸນີຜູ້ວ່າງ
ປະພຶດຢູ່ ບໍ່ມຸ້ງຫວັງກາມທັງຫຼາຍ ຜູ້ຂ້າມໂອຄະໄດ້ແລ້ວ

ຄຳວ່າ ຜູ້ວ່າງ ໃນຄຳວ່າ ມຸນີຜູ້ວ່າງ ປະພຶດຢູ່ ອະທິບາຍວ່າ ຜູ້ວ່າງ ຄື ສະຫງັດ ງຽບ ໄດ້ແກ່ ຜູ້ວ່າງ ຄື ສະຫງັດ ງຽບຈາກກາຍທຸດຈະຣິດ ຯລຯ ວະຈີທຸດຈະຣິດ ຯລຯ ມະໂນທຸດຈະຣິດ ຯລຯ ຣາຄະ .. ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯມະທະ ຯລຯ ປະມາທະ ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນ ທຸກສະຖານ ຯລຯ ຄວາມເດືອດຮ້ອນ ທຸກປະການ ຜູ້ວ່າງ ຄື ສະຫງັດ ງຽບຈາກອະກຸສະລາພິສັງຂານທຸກປະເພດ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ປະພຶດຢູ່ ໄດ້ແກ່ ປະພຶດຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ມຸນີຜູ້ວ່າງ ປະພຶດຢູ່

ຄຳວ່າ ບໍ່ມຸ້ງຫວັງກາມທັງຫຼາຍ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ມຸນີກຳນົດຮູ້ວັດຖຸກາມ ລະ ຄື ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດກາມ ບໍ່ມຸ້ງຫວັງໃນກາມທັງຫຼາຍ ຄື ເປັນຜູ້ສະລະກາມແລ້ວ ຄາຍກາມແລ້ວ ປ່ອຍກາມແລ້ວ ລະກາມແລ້ວ ສະລັດຖິ້ມກາມແລ້ວ ໄດ້ແກ່ ເປັນຜູ້ຄາຍຄວາມກຳໜັດແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ບໍ່ມຸ້ງຫວັງກາມທັງຫຼາຍ

ຄຳວ່າ ໝູ່ສັດ ໃນຄຳວ່າ ໝູ່ສັດຜູ້ຕິດໃຈໃນກາມທັງຫຼາຍ ຍ່ອມຍິນດີ ຯລຯ ຜູ້ຂ້າມໂອຄະໄດ້ແລ້ວ ເປັນຊື່ຮຽກສັດ ໝູ່ສັດຜູ້ກຳໜັດ ຍິນດີ ຕິດໃຈ ຄື ສະຍົບ ມົກມຸ້ນ ເກາະຕິດ ກ່ຽວພັນ ພົວພັນໃນກາມທັງຫຼາຍ ສັດເຫຼົ່ານັ້ນ ຍ່ອມຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງມຸນີຜູ້ຂ້າມ ຄື ຜູ້ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນເຊິ່ງກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ທາງແຫ່ງສົງສານທັງປວງ ໄດ້ແລ້ວ ເຖິງຝັ່ງ ບັນລຸຝັ່ງ ເຖິງທີ່ສຸດ ບັນລຸທີ່ສຸດ

ເຖິງສ່ວນສຸດ ບັນລຸສ່ວນສຸດ ເຖິງທ້າຍສຸດ ບັນລຸທ້າຍສຸດ ເຖິງທີ່ປົກປ້ອງ ບັນລຸທີ່ປົກປ້ອງ ເຖິງທີ່ປ້ອງກັນ ບັນລຸທີ່ປ້ອງກັນ ເຖິງທີ່ຫຼົບຫຼີກ ບັນລຸທີ່ຫຼົບຫຼີກ ເຖິງທີ່ເພິ່ງ ບັນລຸທີ່ເພິ່ງ ເຖິງທີ່ບໍ່ມີໄພ ບັນລຸທີ່ບໍ່ມີໄພ ເຖິງທີ່ບໍ່ຈຸຕິ ບັນລຸທີ່ບໍ່ຈຸຕິ ເຖິງອະມະຕະທຳ ບັນລຸອະມະຕະທຳ ເຖິງນິບພານ ບັນລຸນິບພານ ປຽບເໝືອນພວກລູກໜີ້ ຍ່ອມປາຖະໜາ ຍິນດີ ຄວາມເປັນຜູ້ໝົດໜີ້ ສັນໃດ ພວກທີ່ປ່ວຍໄຂ້ ຍ່ອມປາຖະໜາ ຍິນດີ ຄວາມເປັນຜູ້ຫາຍໂຣກ ສັນໃດ ພວກທີ່ຕິດຢູ່ໃນຄຸກ ຍ່ອມປາຖະໜາ ຍິນດີ ຄວາມພົ້ນຈາກຄຸກ ສັນໃດ ພວກທາດ ຍ່ອມປາຖະໜາ ຍິນດີ ຄວາມເປັນອິດສະຫຼະ ສັນໃດ ພວກຄົນເດີນທາງກັນດານ ຍ່ອມປາຖະໜາ ຍິນດີ ພາກພື້ນທີ່ກະເສມ ສັນໃດ ໝູ່ສັດກໍສັນນັ້ນຄືກັນ ເປັນຜູ້ກຳໜັດ ຍິນດີ ຕິດໃຈ ຄື ສະຍົບ ມົກມຸ້ນ ເກາະຕິດ ກ່ຽວພັນ ພົວພັນໃນກາມທັງຫຼາຍ ໝູ່ສັດເຫຼົ່ານັ້ນ ຍ່ອມຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ມຸນີຜູ້ຂ້າມ ຄື ຜູ້ຂ້າມຂຶ້ນ ຂ້າມພົ້ນກາໂມຄະ ຯລຯ ພະໂວຄະ ຯລຯ ເຖິງນິບພານ ບັນລຸນິບພານ ລວມຄວາມວ່າ ໝູ່ສັດຜູ້ຕິດໃຈໃນກາມທັງຫຼາຍ ຍ່ອມຍິນດີ ຯລຯ ຜູ້ຂ້າມໂອຄະໄດ້ແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ໝູ່ສັດຜູ້ຕິດໃຈໃນກາມທັງຫຼາຍ ຍ່ອມຍິນດີມຸນີຜູ້ວ່າງ
ປະພຶດຢູ່ ບໍ່ມຸ້ງຫວັງກາມທັງຫຼາຍ ຜູ້ຂ້າມໂອຄະໄດ້ແລ້ວ

**ຕິດສະເມດເຕີຍຍະສຸດຕະນິດເທດທີ ໆ ຈົບ**

# ๙. ປະສູຣະສຸດຕະນິດເທດ

## ອະທິບາຍປະສູຣະສູດ

### ວ່າດ້ວຍປະຣິພາຊົກຊື່ວ່າປະສູຣະ

ພຣະສາຣີບຸດເຖຣະຈະກ່າວອະທິບາຍປະສູຣະສູດ ດັ່ງຕໍ່ໄປນີ້

[໕໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສະມະນະພາມເປັນຈຳນວນຫຼາຍ
ຍ່ອມກ່າວຄວາມບໍລິສຸດໃນທຳນີ້ເທົ່ານັ້ນ
ບໍ່ກ່າວຄວາມບໍລິສຸດໃນທຳເຫຼົ່າອື່ນ
ບຸກຄົນອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມ
ຍ້ອນທິດຖິຂອງຕົນນັ້ນ ເປັນຜູ້ຕັ້ງຢູ່ໃນປັດເຈກສັດຈະ

ຄຳວ່າ ຍ່ອມກ່າວຄວາມບໍລິສຸດໃນທຳນີ້ເທົ່ານັ້ນ ອະທິບາຍວ່າ ຍ່ອມກ່າວ ຄື ເວົ້າບອກ ສະແດງ ຊີ້ແຈ່ງ ຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປໃນທຳນີ້ເທົ່ານັ້ນ ໄດ້ແກ່ ກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຯລຯ ໂລກບໍ່ທ່ຽງ ຯລຯ ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນຢ່າງດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດີເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະບໍ່ເກີດອີກ ຯລຯ ຍ່ອມກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປວ່າ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ຍ່ອມກ່າວ ຄວາມບໍລິສຸດໃນທຳນີ້ເທົ່ານັ້ນ

ຄຳວ່າ ບໍ່ກ່າວຄວາມບໍລິສຸດໃນທຳເຫຼົ່າອື່ນ ອະທິບາຍວ່າ ຍ່ອມຖິ້ມ ລະຖິ້ມ ປະຖິ້ມ ວາທະອື່ນທຸກຢ່າງ ນອກຈາກສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກ ຂອງຕົນ ກ່າວແນວນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງແນວນີ້ວ່າ ສາດສະດານັ້ນບໍ່ແມ່ນສັບພັນຍູ ທຳບໍ່ແມ່ນສາດສະດາກ່າວສອນໄວ້ດີແລ້ວ ໝູ່ຄະນະບໍ່ແມ່ນຜູ້ປະຕິບັດດີ ແລ້ວ ທິດຖິບໍ່ແມ່ນສິ່ງທີ່ຈະເລີນ ປະຕິປະທາບໍ່ແມ່ນສາດສະດາບັນຍັດໄວ້ດີແລ້ວ ມັກ ບໍ່ແມ່ນທາງນຳອອກ

ຈາກທຸກ ໃນທຳນັ້ນບໍ່ມີຄວາມມົດຈົດ ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຫຼືຄວາມຫຼຸດພົ້ນໄປ ຄື ໃນທຳນັ້ນ ສັດທັງຫຼາຍ ຍ່ອມມົດຈົດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼື ຫຼຸດພົ້ນໄປບໍ່ໄດ້ ສັດທັງຫຼາຍເປັນຜູ້ຊົ່ວ ຄື ຊາມ ຕ່ຳຊາມ ໜ້າ ຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ບໍ່ກ່າວຄວາມມົດຈົດໃນທຳເຫຼົ່າອື່ນ

ຄຳວ່າ ບຸກຄົນອາໄສສາດສະດາໃດ ໃນຄຳວ່າ ບຸກຄົນອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມ ຍ້ອນທິດຖິຂອງຕົນນັ້ນ ອະທິບາຍວ່າ ອາໄສ ຄື ອີງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ປະຕິປະທາ ມັກໃດ

ຄຳວ່າ ຍ້ອນທິດຖິຂອງຕົນນັ້ນ ໄດ້ແກ່ ຍ້ອນທິດຖິຂອງຕົນ ຄື ໃນຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ

ຄຳວ່າ ກ່າວວ່າ ດີງາມ ໄດ້ແກ່ ກ່າວວ່າງາມ ຄື ກ່າວວ່າດີ ກ່າວວ່າສະຫຼາດ ກ່າວວ່າເປັນນັກປາດ ກ່າວວ່າມີຍານ ກ່າວວ່າມີເຫດຜົນ ກ່າວວ່າມີຄຸນລັກສະນະ ກ່າວວ່າເໝາະແກ່ເຫດ ກ່າວວ່າສົມຖານະ ຍ້ອນລັດທິຂອງຕົນ ລວມຄວາມວ່າ ບຸກຄົນອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມ ຍ້ອນທິດຖິຂອງຕົນນັ້ນ

ຄຳວ່າ ສະມະນະພາມເປັນຈຳນວນຫຼາຍ ຯລຯ ເປັນຜູ້ຕັ້ງຢູ່ໃນປັດເຈກສັດຈະອະທິ ບາຍວ່າ ສະມະນະພາມເປັນຈຳນວນຫຼາຍ ເປັນຜູ້ຕັ້ງຢູ່ ຄື ເປັນຜູ້ຕັ້ງໝັ້ນ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອໃນປັດເຈກສັດຈະ ໄດ້ແກ່ ຕັ້ງຢູ່ ຄື ຕັ້ງໝັ້ນ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈ ເຊື່ອວ່າໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຯລຯ ໂລກບໍ່ທ່ຽງ ຯລຯ ຕັ້ງຢູ່ ຄື ຕັ້ງໝັ້ນ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອວ່າ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າ ເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ສະມະນະພາມເປັນຈຳນວນຫຼາຍ ຯລຯ ເປັນຜູ້ຕັ້ງຢູ່ໃນປັດເຈກສັດຈະ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສະມະນະພາມເປັນຈຳນວນຫຼາຍ
ຍ່ອມກ່າວຄວາມມົດຈົດໃນທຳນີ້ເທົ່ານັ້ນ
ບໍ່ກ່າວຄວາມມົດຈົດໃນທຳເຫຼົ່າອື່ນ
ບຸກຄົນອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມ
ຍ້ອນທິດຖິຂອງຕົນນັ້ນ ເປັນຜູ້ຕັ້ງຢູ່ໃນປັດເຈກສັດຈະ

[໖໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສະມະນະພາມເຫຼົ່ານັ້ນເປັນຄົນຢາກເວົ້າ
ເຂົ້າໄປສູ່ບໍລິສັດແລ້ວ ຈັບຄູ່ ກ່າວຫາກັນແລະກັນວ່າ ເປັນຄົນພານ

ສະມະນະພາມເຫຼົ່ານັ້ນອາໄສສິ່ງອື່ນແລ້ວ
ຍ່ອມກ່າວຄຳເວົ້າຂັດແຍ່ງກັນ
ຢາກໄດ້ຄວາມສັນເສີນ ກໍກ່າວຍົກຕົນວ່າ ເປັນຜູ້ສະຫຼາດ

## ວ່າດ້ວຍການຍົກວາທະ

ຄຳວ່າ ສະມະນະພາມເຫຼົ່ານັ້ນເປັນຄົນຢາກເວົ້າ ໃນຄຳວ່າ ສະມະນະພາມເຫຼົ່ານັ້ນເປັນຄົນຢາກເວົ້າ ເຂົ້າໄປສູ່ບໍລິສັດແລ້ວ ອະທິບາຍວ່າ ສະມະນະພາມເຫຼົ່ານັ້ນ ເປັນຄົນຢາກເວົ້າ ຄື ເປັນຄົນຕ້ອງການເວົ້າ ປະສົງຈະເວົ້າ ມຸ້ງໝາຍຈະເວົ້າ ທ່ຽວສະແຫວງຫາການເວົ້າ

ຄຳວ່າ ເຂົ້າໄປສູ່ບໍລິສັດແລ້ວ ໄດ້ແກ່ ເຂົ້າໄປແລ້ວ ຄື ກ້າວລົງແລ້ວ ແຊກເຂົ້າໄປແລ້ວ ເຂົ້າເຖິງແລ້ວ ເຊິ່ງຂັດຕິຍະບໍລິສັດ ພາມມະນະບໍລິສັດ ຄະຫະບໍດີບໍລິສັດ ສະມະນະບໍລິສັດ ລວມຄວາມວ່າ ສະມະນະພາມເຫຼົ່ານັ້ນເປັນຄົນຢາກເວົ້າ ເຂົ້າໄປສູ່ບໍລິສັດແລ້ວ

ຄຳວ່າ ຈັບຄູ່ ໃນຄຳວ່າ ຈັບຄູ່ ກ່າວຫາກັນແລະກັນວ່າ ເປັນຄົນພານ ອະທິບາຍວ່າ ຄົນ ໒ ພວກ ຄົນກໍ່ການຜິດຖຽງກັນ ໒ ຝ່າຍ ຄົນກໍ່ການໝາງໃຈກັນ ໒ ຝ່າຍ ຄົນກໍ່ການອື້ສາວກັນ ໒ ຝ່າຍ ຄົນກໍ່ການວິວາດກັນ ໒ ຝ່າຍ ຄົນກໍ່ອະທິກອນກັນ ໒ ຝ່າຍ ຄົນວ່າກ່າວກັນ ໒ ຝ່າຍ ຄົນໂຕ້ຖຽງກັນ ໒ ຝ່າຍ ຄົນເຫຼົ່ານັ້ນ ກ່າວຫາ ຄື ເຫັນ ແນມເຫັນ ເພ່ງພິນິດ ພິຈາລະນາເບິ່ງກັນແລະກັນ ໂດຍຄວາມເປັນຄົນພານ ຄື ໂດຍຄວາມເປັນ ຄົນຊົ່ວ ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ຈັບຄູ່ ກ່າວຫາ ກັນແລະກັນວ່າ ເປັນຄົນພານ

ຄຳວ່າ ສະມະນະພາມເຫຼົ່ານັ້ນອາໄສສິ່ງອື່ນແລ້ວ ຍ່ອມກ່າວຄຳເວົ້າຂັດແຍ່ງກັນ ອະທິບາຍວ່າ ອາໄສ ຄື ອີງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກອື່ນຄວາມຜິດຖຽງກັນ ຄວາມໝາງໃຈກັນ ຄວາມຍາດແຍ່ງກັນ ຄວາມວິວາດກັນ ການມຸ້ງຮ້າຍກັນ ຕັດຮຽກວ່າ ຄຳເວົ້າທີ່ຂັດແຍ່ງກັນ

ອີກໄນໜຶ່ງ ຄຳວ່າ ຄຳເວົ້າຂັດແຍ່ງກັນ ໄດ້ແກ່ ຄຳເວົ້າທີ່ບໍ່ນຸ້ມນວນ ອະທິບາຍວ່າ ສະມະນະພາມເຫຼົ່ານັ້ນ ຍ່ອມກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງຄຳເວົ້າຂັດແຍ່ງກັນ ຄື ຄຳຜິດຖຽງກັນ ຄຳໝາງໃຈກັນ ຄຳຍາດແຍ່ງກັນ ຄຳວິວາດກັນ ຄຳມຸ້ງຮ້າຍກັນ ລວມຄວາມວ່າ ສະມະນະພາມເຫຼົ່ານັ້ນ ອາໄສສິ່ງອື່ນແລ້ວ ຍ່ອມກ່າວຄຳເວົ້າຂັດແຍ່ງກັນ

ຄຳວ່າ ຢາກໄດ້ຄວາມສັນເສີນ ໃນຄຳວ່າ ຢາກໄດ້ຄວາມສັນເສີນ ກໍກ່າວຍົກຕົນວ່າເປັນຜູ້ສະຫຼາດ ອະທິບາຍວ່າ ຢາກໄດ້ຄວາມສັນເສີນ ຄື ຕ້ອງການຄວາມສັນເສີນ ປະສົງຄວາມສັນເສີນ ມຸ້ງໝາຍຄວາມສັນເສີນ ທ່ຽວສະແຫວງຫາຄວາມສັນເສີນ

ຄຳວ່າ ກໍກ່າວຍົກຕົນວ່າ ເປັນຜູ້ສະຫຼາດ ໄດ້ແກ່ ກ່າວຍົກຕົນວ່າເປັນຜູ້ສະຫຼາດ ຄື ກ່າວວ່າເປັນບັນດິດ ກ່າວວ່າເປັນນັກປາດ ກ່າວວ່າມີຍານ ກ່າວວ່າສົມເຫດຜົນ ກ່າວວ່າມີຄຸນລັກສະນະ ກ່າວວ່າເໝາະແກ່ເຫດ ກ່າວວ່າສົມຖານະຕາມລັດທິຂອງຕົນ ລວມຄວາມວ່າ ຢາກໄດ້ຄວາມສັນເສີນ ກໍກ່າວຍົກຕົນວ່າ ເປັນຜູ້ສະຫຼາດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສະມະນະພາມເຫຼົ່ານັ້ນເປັນຄົນຢາກເວົ້າ
ເຂົ້າໄປສູ່ບໍລິສັດແລ້ວ ຈັບຄູ່ ກ່າວຫາກັນແລະກັນວ່າ ເປັນຄົນພານ
ສະມະນະພາມເຫຼົ່ານັ້ນອາໄສສິ່ງອື່ນແລ້ວ
ຍ່ອມກ່າວຄຳເວົ້າຂັດແຍ່ງກັນ
ຢາກໄດ້ຄວາມສັນເສີນ ກໍກ່າວຍົກຕົນວ່າ ເປັນຜູ້ສະຫຼາດ

[໗໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄົນຜູ້ປະກອບຄຳເວົ້າ (ເພື່ອກ່າວ) ໃນທ່າມກາງບໍລິສັດ
ເມື່ອຢາກໄດ້ຄວາມສັນເສີນ ຍ່ອມເປັນຜູ້ລັງເລໃຈ
ເປັນຜູ້ເກີ້ເຂີນ ໃນເມື່ອຖືກຄ້ານຕົກໄປ ຍ່ອມຄຽດ
ຍ້ອນຄຳນິນທາ ສະແຫວງຫາຂໍ້ແກ້ໂຕ

## ວ່າດ້ວຍພ່າຍແພ້ວາທະແລ້ວຂັດເຄືອງ

ຄຳວ່າ ຄົນຜູ້ປະກອບຄຳເວົ້າ (ເພື່ອກ່າວ) ໃນທ່າມກາງບໍລິສັດ ອະທິບາຍວ່າ ຄົນຜູ້ປະກອບ ຄື ກຽມຕົວ ກະກຽມ ລວບລວມ ຮຽບຮຽງ ຄຳເວົ້າຂອງຕົນເພື່ອກ່າວໃນທ່າມກາງຂັດຕິຍະບໍລິສັດ ພາມມະນະບໍລິສັດ ຄະຫະບໍດີບໍລິສັດ ຫຼື ສະມະນະບໍລິສັດ ລວມຄວາມວ່າ ຄົນຜູ້ປະກອບຄຳເວົ້າ (ເພື່ອກ່າວ) ໃນທ່າມກາງບໍລິສັດ

ຄຳວ່າ ເມື່ອຢາກໄດ້ຄວາມສັນເສີນ ໃນຄຳວ່າ ເມື່ອຢາກໄດ້ຄວາມສັນເສີນ ຍ່ອມເປັນຜູ້ລັງເລໃຈ ອະທິບາຍວ່າ ເມື່ອຢາກໄດ້ ຄື ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງຄວາມສັນເສີນ ຄືຄວາມຊົມເຊີຍ ຄວາມມີກຽດ ຄວາມຍ້ອງຍໍຄຸນຄວາມດີ

ຄຳວ່າ ຍ່ອມເປັນຜູ້ລັງເລໃຈ ອະທິບາຍວ່າ ກ່ອນຕອບໂຕ້ ຍ່ອມສົງໄສ ລັງເລໃຈ ຄືກ່ອນຕອບໂຕ້ ຍ່ອມສົງໄສ ລັງເລໃຈ ແນວນີ້ວ່າ ເຮົາຈັກມີໄຊ ຫຼື ພ່າຍແພ້ ຈັກຂົ່ມເຂົາແນວໃດຈັກເຮັດລັດທິຂອງເຮົາໃຫ້ເລີດລອຍໄດ້ແນວໃດ ຈັກເຮັດໃຫ້ພິເສດໄດ້ແນວໃດ ຈັກເຮັດໃຫ້ວິເສດຍິ່ງຂຶ້ນໄປໄດ້ແນວໃດ ຈັກທຳການຜູກມັດໄດ້ແນວໃດ ຈັກທຳຄວາມຜ່ອນຄາຍໄດ້ແນວໃດ ຈັກທຳຄວາມຕັດຮອນໄດ້ແນວໃດ ຈັກຕິຂະນາບວາທະເຂົາໄດ້ແນວໃດ ລວມຄວາມວ່າ ເມື່ອຢາກໄດ້ຄວາມສັນເສີນ ຍ່ອມເປັນຜູ້ລັງເລໃຈ

ຄຳວ່າ ເປັນຜູ້ເກີ້ເຂີນ ໃນເມື່ອຖືກຄ້ານຕົກໄປ ອະທິບາຍວ່າ ບໍລິສັດ ສະມາຊິກຂອງບໍລິສັດ ຜູ້ພິຈາລະນາບັນຫາ ເປັນຜູ້ມີເຫດຜົນ ຍ່ອມຄັດຄ້ານໃຫ້ຕົກໄປ ຄື ຄັດຄ້ານໃຫ້ຕົກໄປໂດຍອັດຖະວ່າ ຄຳທີ່ທ່ານເວົ້າຂາດຄວາມໝາຍ ຄັດຄ້ານໃຫ້ຕົກໄປໂດຍພະຍັນຊະນະວ່າ ສິ່ງທີ່ທ່ານເວົ້າແລ້ວບໍ່ຖືກຕ້ອງໂດຍພະຍັນຊະນະ ຄັດຄ້ານໃຫ້ຕົກໄປທັງໂດຍອັດຖະແລະພະຍັນຊະນະວ່າ ສິ່ງທີ່ທ່ານເວົ້າແລ້ວບໍ່ຖືກຕ້ອງທັງໂດຍອັດຖະ ແລະພະຍັນຊະນະ ຄັດຄ້ານໃຫ້ຕົກໄປວ່າ ອັດຖະທີ່ທ່ານນຳມາບໍ່ຖືກຕ້ອງ ພະຍັນຊະນະທີ່ທ່ານຍົກຂຶ້ນມາບໍ່ຖືກຕ້ອງ ທັງອັດຖະແລະພະຍັນຊະນະທີ່ທ່ານນຳມາແລະຍົກຂຶ້ນມາບໍ່ຖືກຕ້ອງ ຄວາມຂົ່ມຜູ້ອື່ນທ່ານຍັງບໍ່ໄດ້ເຮັດ ການເຮັດລັດທິໃຫ້ເລີດລອຍທ່ານຍັງເຮັດບໍ່ດີ ຄວາມພິເສດທ່ານຍັງບໍ່ໄດ້ເຮັດ ການເຮັດໃຫ້ພິເສດຍິ່ງຂຶ້ນທ່ານຍັງເຮັດບໍ່ດີ ຄວາມຜູກມັດ ທ່ານຍັງບໍ່ໄດ້ເຮັດ ຄວາມຜ່ອນຄາຍທ່ານຍັງເຮັດບໍ່ຖືກຕ້ອງ ຄວາມຕັດຮອນທ່ານຍັງບໍ່ໄດ້ເຮັດ ການຂະນາບວາທະທ່ານເຮັດບໍ່ຖືກຕ້ອງ ທ່ານເວົ້າບໍ່ຖືກຕ້ອງ ກ່າວບໍ່ຖືກຕ້ອງ ເຈຣະຈາບໍ່ຖືກຕ້ອງ ເປ່ງວາຈາຜິດ ກ່າວໃຫ້ຄາດເຄື່ອນ ເວົ້າຊົ່ວ

ຄຳວ່າ ເປັນຜູ້ເກີ້ເຂີນ ໃນເມື່ອຖືກຄ້ານຕົກໄປ ອະທິບາຍວ່າ ເມື່ອຖືກຄັດຄ້ານໃຫ້ຕົກໄປເປັນຜູ້ເກີ້ເຂີນ ຄື ຖືກບີບຄັ້ນ ຖືກເຮັດໃຫ້ລະອາຍ ຖືກເຮັດໃຫ້ກະວົນກະວາຍ ເຖິງຄວາມ ທຸກໃຈ ລວມຄວາມວ່າ ເປັນຜູ້ເກີ້ເຂີນ ໃນເມື່ອຖືກຄ້ານຕົກໄປ

ຄຳວ່າ ຍ້ອນຄຳນິນທາ ໃນຄຳວ່າ ຍ່ອມຄຽດ ຍ້ອນຄຳນິນທາ ສະແຫວງຫາ ຂໍ້ແກ້ໂຕ ອະທິບາຍວ່າ ຍ້ອນຄຳນິນທາ ຄື ຄຳກ່າວຫາ ຄຳບໍ່ຊົມເຊີຍ ຄຳບໍ່ສັນເສີນຄຸນຄວາມດີ

ຄຳວ່າ ຍ່ອມຄຽດ ໄດ້ແກ່ ຍ່ອມຄຽດ ຄື ແຄ້ນເຄືອງ ຂຸ່ນເຄືອງ ໄດ້ແກ່ ທຳຄວາມຄຽດຄວາມຂັດເຄືອງ ແລະຄວາມບໍ່ພໍໃຈໃຫ້ຜາກົດ ລວມຄວາມວ່າ ຍ່ອມຄຽດ ຍ້ອນຄຳນິນທາ

ຄຳວ່າ ສະແຫວງຫາຂໍ້ແກ້ໂຕ ໄດ້ແກ່ ສະແຫວງຫາຂໍ້ແກ້ໂຕ ຄື ສະແຫວງຫາຂໍ້ຜິດ ສະແຫວງຫາຂໍ້ພັ້ງຜິດ ສະແຫວງຫາຂໍ້ຜິດພາດ ສະແຫວງຫາຂໍ້ພັ້ງເຜີ ສະແຫວງຫາປ່ອງທາງ ລວມຄວາມວ່າ ຍ່ອມຄຽດ ຍ້ອນຄຳນິນທາ ສະແຫວງຫາຂໍ້ແກ້ໂຕ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄົນຜູ້ປະກອບຄຳເວົ້າ (ເພື່ອກ່າວ) ໃນທ່າມກາງບໍລິສັດ
ເມື່ອຢາກໄດ້ຄວາມສັນເສີນ ຍ່ອມເປັນຜູ້ລັງເລໃຈ
ເປັນຜູ້ເກີ້ເຂີນ ໃນເມື່ອຖືກຄ້ານຕົກໄປ ຍ່ອມຄຽດ
ຍ້ອນຄຳນິນທາ ສະແຫວງຫາຂໍ້ແກ້ໂຕ

[໖໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບໍລິສັດຜູ້ພິຈາລະນາບັນຫາກ່າວວາທະຂອງເຂົາວ່າຊົ່ວ
ຖືກຄັດຄ້ານຕົກໄປແລ້ວ ເຂົາເສື່ອມວາທະໄປແລ້ວ
ຍ່ອມຮ່ຳໄຮ ເສົ້າໂສກ ທອດຖອນໃຈວ່າ ເຂົານຳ (ໜ້າ) ເຮົາໄປແລ້ວ
ວ່າດ້ວຍຖືກຂົ່ມດ້ວຍວາທະແລ້ວເສຍໃຈ

ຄຳວ່າ ກ່າວວາທະຂອງເຂົາວ່າ ຊົ່ວ ອະທິບາຍວ່າ ຊຸມຊົນຜູ້ພິຈາລະນາບັນຫາ ໄດ້ກ່າວແບບນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງວາທະຂອງເຂົາວ່າ ຊົ່ວ ຄື ຊາມ ຕ່ຳຊາມ ເສື່ອມເສຍ ບໍ່ບໍລິບູນ ຢ່າງນີ້ ລວມຄວາມວ່າ ກ່າວວາທະຂອງເຂົາວ່າ ຊົ່ວ

ຄຳວ່າ ບໍລິສັດຜູ້ພິຈາລະນາບັນຫາ ໗ລ໗ ຖືກຄັດຄ້ານຕົກໄປແລ້ວ ອະທິບາຍວ່າ ບໍລິສັດ ສະມາຊິກຂອງບໍລິສັດ ຜູ້ພິຈາລະນາບັນຫາ ເປັນຜູ້ມີເຫດຜົນ ຍ່ອມຄັດຄ້ານໃຫ້ຕົກໄປ ຄື ຄັດຄ້ານໃຫ້ຕົກໄປໂດຍອັດຖະວ່າ ຄຳທີ່ທ່ານເວົ້າຂາດຄວາມໝາຍ ຄັດຄ້ານໃຫ້ຕົກໄປໂດຍພະຍັນຊະນະວ່າ ສິ່ງທີ່ທ່ານເວົ້າແລ້ວບໍ່ຖືກຕ້ອງໂດຍພະຍັນຊະນະ ຄັດຄ້ານໃຫ້ຕົກໄປທັງໂດຍອັດຖະແລະພະຍັນຊະນະວ່າ ສິ່ງທີ່ທ່ານເວົ້າແລ້ວບໍ່ຖືກຕ້ອງທັງໂດຍອັດຖະແລະພະຍັນຊະນະ ຄັດຄ້ານໃຫ້ຕົກໄປວ່າ ອັດຖະທີ່ທ່ານນຳມາບໍ່ຖືກຕ້ອງ ພະຍັນຊະນະທີ່ທ່ານຍົກຂຶ້ນມາບໍ່ຖືກຕ້ອງ ທັງອັດຖະແລະພະຍັນຊະນະທີ່ທ່ານນຳມາແລະຍົກຂຶ້ນມາບໍ່ຖືກຕ້ອງ ຄວາມຂົ່ມຜູ້ອື່ນທ່ານຍັງ ບໍ່ໄດ້ເຮັດ ການເຮັດລັດທິໃຫ້ເລີດລອຍທ່ານຍັງເຮັດບໍ່ດີ ຄວາມພິເສດທ່ານຍັງບໍ່ໄດ້ເຮັດ ການເຮັດໃຫ້ພິເສດຍິ່ງຂຶ້ນທ່ານຍັງເຮັດບໍ່ດີ ຄວາມຜູກມັດທ່ານຍັງບໍ່ໄດ້ເຮັດ ຄວາມຜ່ອນຄາຍທ່ານເຮັດໄວ້ບໍ່ຖືກຕ້ອງ ຄວາມຕັດຮອນທ່ານຍັງບໍ່ໄດ້ເຮັດ ການຂະນາບວາທະທ່ານເຮັດບໍ່ຖືກຕ້ອງ ທ່ານເວົ້າບໍ່ຖືກຕ້ອງ ກ່າວບໍ່ຖືກຕ້ອງ ເຈຣະຈາບໍ່ຖືກຕ້ອງ ເປ່ງວາຈາຜິດ ກ່າວໃຫ້ຄາດເຄື່ອນ ເວົ້າຊົ່ວ ລວມຄວາມວ່າ ບໍລິສັດຜູ້ພິຈາລະນາບັນຫາ ໗ລ໗ ຖືກຄັດຄ້ານຕົກໄປແລ້ວ

ຄຳວ່າ ຍ່ອມຮ່ຳໄຮ ໃນຄຳວ່າ ເຂົາເສື່ອມວາທະໄປແລ້ວ ຍ່ອມຮ່ຳໄຮ ເສົ້າໂສກ ອະທິບາຍວ່າ ການເວົ້າລ່າຍ ການເວົ້າເພີ້ ການເວົ້າເພີ້ເຈົ້ ຄວາມພ່ຳເພີ້ ກິຣິຍາທີ່ພ່ຳເພີ້ ພາວະທີ່ພ່ຳເພີ້ ເຫັນປານນີ້ວ່າ ເຮົານຶກ ຄິດ ພິຈາລະນາ ກຳນົດໄວ້ເປັນຢ່າງອື່ນ ເຂົາມີພວກຫຼາຍ ມີບໍລິສັດຫຼາຍ ມີບໍລິວານຫຼາຍ ແລະບໍລິສັດນີ້ເປັນພວກແຕ່ບໍ່ພ້ອມພຽງກັນ ຂໍໃຫ້ມີການເວົ້າຈາປາໄສເພື່ອໃຫ້ບໍລິສັດພ້ອມພຽງກັນເທີ້ນ ເຮົາຈັກທຳລາຍເຂົາອີກ ລວມຄວາມວ່າ ຍ່ອມຮ່ຳໄຮ

ຄຳວ່າ ເສົ້າໂສກ ໄດ້ແກ່ ເສົ້າໂສກ ຄື ລຳບາກໃຈ ຄ່ຳຄວນ ຕີເອິກພ່ຳເພີ້ ເຖິງຄວາມຫຼົງໃຫຼວ່າ ເຂົາມີໄຊຊະນະ ເຮົາພ່າຍແພ້ ເຂົາໄດ້ລາບ ເຮົາບໍ່ໄດ້ລາບ ເຂົາມີຍົດ ເຮົາບໍ່ມີຍົດ ເຂົາໄດ້ຄວາມສັນເສີນ ເຮົາໄດ້ແຕ່ການນິນທາ ເຂົາມີສຸກ ເຮົາມີທຸກ ເຂົາໄດ້ຮັບສັກກາຣະ ເຄົາລົບ ນັບຖືບູຊາ ຢຳເກງ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະ ປັດໄຈເພ ສັດບໍຣິຂານ ເຮົາບໍ່ໄດ້ຮັບສັກກາຣະ ເຄົາລົບ ນັບຖື ບູຊາ ຢຳເກງ ບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ລວມຄວາມວ່າ ຍ່ອມຮ່ຳໄຮ ເສົ້າໂສກ

ຄຳວ່າ ເສື່ອມວາທະໄປແລ້ວ ໄດ້ແກ່ ເສື່ອມວາທະໄປແລ້ວ ຄື ມີວາທະຊົ່ວ ຊາມ ຕ່ຳຊາມ ເສື່ອມເສຍ ບໍ່ບໍລິບູນ ລວມຄວາມວ່າ ເສື່ອມວາທະໄປແລ້ວ ຍ່ອມຮ່ຳໄຮ ເສົ້າໂສກ

ຄຳວ່າ ທອດຖອນໃຈວ່າ ເຂົານຳ (ໜ້າ) ເຮົາໄປແລ້ວ ອະທິບາຍວ່າ ທອດຖອນໃຈວ່າ ເຂົານຳ ຄື ລ່ວງເລີຍ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນເຮົາ ຄືວາທະເຮົາ ດ້ວຍວາທະເຂົາແລ້ວ ລວມຄວາມວ່າ ເຂົານຳ (ໜ້າ) ເຮົາໄປແລ້ວ ແນວນີ້ແດ່

ອີກໃນໜຶ່ງ ທອດຖອນໃຈວ່າ ເຂົາທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ຄອບງຳ ຖ້ວມທັບ ຮັດຄຶງ ຍ່ຳຍີເຮົາ ຄືວາທະເຮົາ ດ້ວຍວາທະເຂົາ ລວມຄວາມວ່າ ເຂົານຳ (ໜ້າ) ເຮົາໄປແລ້ວ ແນວນີ້ແດ່

ການເວົ້າລ່າຍ ການເວົ້າເພີ້ ການເວົ້າເພີ້ເຈີ້ ຄວາມພ່ຳເພີ້ ກິຣິຍາທີ່ພ່ຳເພີ້ ພາວະທີ່ພ່ຳເພີ້ ຕັດຮຽກວ່າ ການທອດຖອນໃຈ ລວມຄວາມວ່າ ທອດຖອນໃຈວ່າ ເຂົານຳ (ໜ້າ) ເຮົາໄປແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

> ບໍລິສັດຜູ້ພິຈາລະນາບັນຫາກ່າວວາທະຂອງເຂົາວ່າ ຊົ່ວ
> ຖືກຄັດຄ້ານຕົກໄປແລ້ວ ເຂົາເສື່ອມວາທະໄປແລ້ວ
> ຍ່ອມຮ່ຳໄຮ ເສົ້າໂສກ ທອດຖອນໃຈວ່າ ເຂົານຳ (ໜ້າ) ເຮົາໄປແລ້ວ

[໘໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

> ການວິວາດເຫຼົ່ານີ້ເກີດແລ້ວໃນໝູ່ສະມະນະ
> ຄວາມຍິນດີແລະຄວາມຍິນຮ້າຍ ມີຢູ່ໃນການວິວາດເຫຼົ່ານີ້
> ບຸກຄົນເຫັນໂທດນີ້ແລ້ວ ເພິ່ງງົດເວັ້ນຄຳເວົ້າຂັດແຍ່ງກັນ
> ຍ້ອນວ່າບໍ່ມີປະໂຫຍດອື່ນນອກຈາກການໄດ້ຄວາມສັນເສີນ
> ວ່າດ້ວຍໂທດຂອງການວິວາດ

ຄຳວ່າ ການວິວາດເຫຼົ່ານີ້ເກີດແລ້ວໃນໝູ່ສະມະນະ ອະທິບາຍວ່າ

ຄຳວ່າ ສະມະນະ ໄດ້ແກ່ ນັກບວດພວກໃດພວກໜຶ່ງ ເຊິ່ງເຂົ້າເຖິງການບວດເປັນ ປະຣິພາຊົກ ເຖິງການບວດເປັນປະຣິພາຊົກ ພາຍນອກຈາກທຳວິໄນນີ້

ການຜິດຖຽງກັນຍ້ອນທິດຖິ ການໝາງໃຈກັນຍ້ອນທິດຖິ ການຍາດແຍ່ງກັນຍ້ອນ ທິດຖິ ການວິວາດກັນຍ້ອນທິດຖິ ການມຸ້ງຮ້າຍກັນຍ້ອນທິດຖິເຫຼົ່ານີ້ ເກີດແລ້ວ ຄື ເກີດຂຶ້ນແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວໃນໝູ່ສະມະນະ ລວມຄວາມວ່າ ການວິວາທະເຫຼົ່ານີ້ເກີດແລ້ວໃນໝູ່ສະມະນະ

ຄຳວ່າ ຄວາມຍິນດີແລະຄວາມຍິນຮ້າຍ ມີຢູ່ໃນການວິວາດເຫຼົ່ານີ້ ອະທິບາຍວ່າ ມີຊະນະມີພ່າຍແພ້ ມີລາບມີເສື່ອມລາບ ມີຍົດມີເສື່ອມຍົດ ມີນິນທາມີສັນເສີນ ມີສຸກມີທຸກ ມີໂສມະນັດມີໂທມະນັດ ມີອິດຖາຣົມມີອະນິດຖາຣົມ ມີປອດໂປ່ງມີກະທົບຈົບວ່າ ມີຄວາມຍິນດີມີຄວາມຍິນຮ້າຍ ໃຈຍິນດີຍ້ອນຊະນະ ໃຈຍິນຮ້າຍຍ້ອນພ່າຍແພ້ ໃຈຍິນດີຍ້ອນໄດ້ລາບ ໃຈຍິນຮ້າຍ

ຍ້ອນເສື່ອມລາບ ໃຈຍິນດີຍ້ອນໄດ້ຍົດ ໃຈຍິນຮ້າຍຍ້ອນເສື່ອມຍົດ ໃຈຍິນດີຍ້ອນສັນເສີນ ໃຈຍິນຮ້າຍຍ້ອນນິນທາ ໃຈຍິນດີຍ້ອນຄວາມສຸກ ໃຈຍິນຮ້າຍຍ້ອນຄວາມທຸກໃຈຍິນດີຍ້ອນໂສມະນັດ ໃຈຍິນຮ້າຍຍ້ອນໂທມະນັດ ໃຈຍິນດີຍ້ອນເຟື່ອງຟູ ໃຈຍິນຮ້າຍຍ້ອນຕົກອັບ ລວມຄວາມວ່າ ຄວາມຍິນດີແລະຄວາມຍິນຮ້າຍ ມີຢູ່ໃນການວິວາດເຫຼົ່ານີ້

ຄຳວ່າ ເຫັນໂທດນີ້ແລ້ວ ໃນຄຳວ່າ ບຸກຄົນເຫັນໂທດນີ້ແລ້ວ ເພິ່ງງົດເວັ້ນຄຳເວົ້າ ຂັດແຍ່ງກັນ ອະທິບາຍວ່າ ເຫັນແລ້ວ ຄື ແນມເຫັນແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງໂທດນີ້ ໃນການຜິດຖຽງກັນຍ້ອນທິດຖິ ການໝາງໃຈກັນຍ້ອນທິດຖິ ການຍາດແຍ່ງກັນຍ້ອນທິດຖິ ການວິວາດກັນຍ້ອນທິດຖິ ການມຸ້ງຮ້າຍກັນຍ້ອນທິດຖິ

ຄຳວ່າ ບຸກຄົນເຫັນໂທດນີ້ແລ້ວ ເພິ່ງງົດເວັ້ນຄຳເວົ້າຂັດແຍ່ງກັນ ອະທິບາຍວ່າ ການຜິດຖຽງກັນ ການໝາງໃຈກັນ ການຍາດແຍ່ງກັນ ການວິວາດກັນ ການມຸ້ງຮ້າຍກັນ ຕັດຮຽກວ່າ ຄຳເວົ້າຂັດແຍ່ງກັນ

ອີກໄນໜຶ່ງ ຄຳເວົ້າທີ່ຂັດແຍ່ງກັນ ໄດ້ແກ່ ຄຳເວົ້າທີ່ບໍ່ນຸ້ມນວນ ອະທິບາຍວ່າ ບຸກຄົນນັ້ນບໍ່ເພິ່ງກໍ່ຄຳເວົ້າຂັດແຍ່ງກັນ ຄື ບໍ່ເພິ່ງກໍ່ການຜິດຖຽງກັນ ບໍ່ເພິ່ງກໍ່ການໝາງໃຈກັນ ບໍ່ເພິ່ງກໍ່ການຍາດແຍ່ງກັນ ບໍ່ເພິ່ງກໍ່ການວິວາດກັນ ບໍ່ເພິ່ງກໍ່ການມຸ້ງຮ້າຍກັນ ໄດ້ແກ່ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການຜິດຖຽງ ການໝາງໃຈ ການຍາດແຍ່ງ ການວິວາດ ການມຸ້ງຮ້າຍ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບການຜິດຖຽງ ການໝາງໃຈກັນ ການແກ່ງແຍ່ງ ການວິວາດ ການມຸ້ງຮ້າຍ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບຸກຄົນເຫັນໂທດນີ້ແລ້ວ ເພິ່ງງົດເວັ້ນຄຳເວົ້າຂັດແຍ່ງກັນ

ຄຳວ່າ ຍ້ອນວ່າບໍ່ມີປະໂຫຍດອື່ນນອກຈາກການໄດ້ຄວາມສັນເສີນ ອະທິບາຍ ວ່າ ບໍ່ມີປະໂຫຍດອື່ນນອກຈາກການໄດ້ຄວາມສັນເສີນ ຄື ບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເຊິ່ງປະໂຫຍດຕົນປະໂຫຍດຜູ້ອື່ນ ຫຼື ປະໂຫຍດທັງສອງຝ່າຍ ປະໂຫຍດໃນພົບປັດຈຸບັນຫຼືປະໂຫຍດໃນພົບໜ້າ ປະໂຫຍດຕື້ນຫຼືປະໂຫຍດເລິກ ປະໂຫຍດລີ້ລັບ ຫຼື ປະໂຫຍດປົດບັງ ປະໂຫຍດທີ່ຄວນແນະນຳ ຫຼື ປະໂຫຍດທີ່ແນະນຳແລ້ວ ປະໂຫຍດທີ່ບໍ່ມີໂທດ ຫຼື ປະໂຫຍດທີ່ບໍ່ມີກິເລດ ປະໂຫຍດທີ່ຜ່ອງແຜ້ວ ຫຼື ປະໂຫຍດຢ່າງຍິ່ງ ລວມຄວາມວ່າ ຍ້ອນບໍ່ມີປະໂຫຍດອື່ນນອກຈາກການໄດ້ຄວາມສັນເສີນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ການວິວາດເຫຼົ່ານີ້ເກີດແລ້ວໃນໝູ່ສະມະນະ
ຄວາມຍິນດີແລະຄວາມຍິນຮ້າຍ ມີຢູ່ໃນການວິວາດເຫຼົ່ານີ້
ບຸກຄົນເຫັນໂທດນີ້ແລ້ວ ເພິ່ງງົດເວັ້ນຄຳເວົ້າຂັດແຍ່ງກັນ
ຍ້ອນວ່າບໍ່ມີປະໂຫຍດອື່ນນອກຈາກການໄດ້ຄວາມສັນເສີນ

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ກໍຫຼືວ່າ ບຸກຄົນກ່າວວາທະໃນທ່າມກາງບໍລິສັດ
ໄດ້ຮັບຄວາມສັນເສີນ ຍ້ອນທິດຖິຂອງຕົນນັ້ນ
ເຂົາຍ່ອມຫົວ ແລະໃຈຟູດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ
ຍ້ອນໄດ້ບັນລຸເຖິງປະໂຫຍດຕາມທີ່ໃຈຄິດໄວ້ແລ້ວ

ຄຳວ່າ ຍ້ອນທິດຖິຂອງຕົນນັ້ນ ໃນຄຳວ່າ ກໍຫຼືວ່າ ຯລຯ ໄດ້ຮັບຄວາມສັນເສີນຍ້ອນທິດຖິຂອງຕົນນັ້ນ ໄດ້ແກ່ ໄດ້ຮັບຄວາມສັນເສີນ ຄື ຊົມເຊີຍ ຍົກຍ້ອງ ພັນລະນາ ຍ້ອນທິດຖິຂອງຕົນ ຄື ຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ ລວມຄວາມວ່າ ກໍຫຼືວ່າ ຯລຯ ໄດ້ຮັບຄວາມສັນເສີນ ຍ້ອນທິດຖິຂອງຕົນນັ້ນ

ຄຳວ່າ ກ່າວວາທະໃນທ່າມກາງບໍລິສັດ ອະທິບາຍວ່າ ກ່າວ ຄື ບອກວາທະຂອງຕົນ ໄດ້ແກ່ ກ່າວ ເວົ້າ ຊີ້ນຊົມ ເວົ້າເຖິງ ສະແດງ ເຊີດຊູ ຊີ້ແຈ່ງ ຍ້ອງຍໍວາທະທີ່ເອື້ອຕໍ່ວາທະ ຕົນໃນທ່າມກາງຂັດຕິຍະບໍລິສັດ ພາມມະນະບໍລິສັດ ຄະຫະບໍດີບໍລິສັດ ຫຼື ສະມະນະບໍລິສັດ ລວມຄວາມວ່າ ກ່າວວາທະໃນທ່າມກາງບໍລິສັດ

ຄຳວ່າ ເຂົາຍ່ອມຫົວ ແລະໃຈຟູດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ ອະທິບາຍວ່າ ເຂົາຍ່ອມເປັນຜູ້ຍິນດີ ຮ່າເຣິງ ເບີກບານ ມີໃຈແຊ່ມຊື່ນ ມີຄວາມດຳຣິບໍລິບູນດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ ອີກໄນໜຶ່ງ ເປັນຜູ້ຫົວຈົນແນມເຫັນແຂ້ວ

ຄຳວ່າ ເຂົາຍ່ອມຫົວ ແລະໃຈຟູດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ ໄດ້ແກ່ ເຂົາຍ່ອມເປັນຜູ້ລຳພອງຕົນ ຄື ທະນົງຕົນ ເຊີດຊູຕົນເປັນເປັນຄືທຸງ ເທີ່ເທີມ ຕ້ອງການເຊີດຊູຕົນເປັນຄືທຸງ ດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ ລວມຄວາມວ່າ ເຂົາຍ່ອມຫົວ ແລະໃຈຟູດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ

ຄຳວ່າ ຍ້ອນໄດ້ບັນລຸເຖິງປະໂຫຍດຕາມທີ່ໃຈຄິດໄວ້ແລ້ວ ໄດ້ແກ່ ຍ້ອນໄດ້ບັນລຸ ຄື ເຖິງ ເຖິງສະເພາະ ປະສົບ ໄດ້ຮັບປະໂຫຍດແຫ່ງຄວາມຊະນະນັ້ນ

ຄຳວ່າ ຕາມທີ່ໃຈຄິດໄວ້ແລ້ວ ໄດ້ແກ່ ຕາມທີ່ໃຈຄິດໄວ້ແລ້ວ ຄື ໄດ້ເປັນຢ່າງທີ່ຄິດ ໄດ້ເປັນຢ່າງທີ່ດຳຣິ ໄດ້ເປັນຢ່າງທີ່ຮູ້ແຈ້ງ ລວມຄວາມວ່າ ຍ້ອນໄດ້ບັນລຸເຖິງປະໂຫຍດຕາມທີ່ໃຈຄິດໄວ້ແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ກໍຫຼືວ່າ ບຸກຄົນກ່າວວາທະໃນທ່າມກາງບໍລິສັດ
ໄດ້ຮັບຄວາມສັນເສີນ ຍ້ອນທິດຖິຂອງຕົນນັ້ນ
ເຂົາຍ່ອມຫົວ ແລະໃຈຟູດ້ວຍປະໂຫຍດແຫ່ງຄວາມຊະນະນັ້ນ
ຍ້ອນໄດ້ບັນລຸເຖິງປະໂຫຍດຕາມທີ່ໃຈຄິດໄວ້ແລ້ວ

[໗໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄວາມລຳພອງຕົນ ຍ່ອມເປັນພູມສຳລັບຍ່ຳຍີຂອງເຂົາ
ເຂົາຈຶ່ງກ່າວຄຳຖືຕົວແລະຄຳດູໝິ່ນກັນ
ບຸກຄົນເຫັນໂທດນີ້ແລ້ວ ບໍ່ຄວນວິວາທະກັນ
ຍ້ອນຜູ້ສະຫຼາດທັງຫຼາຍ ບໍ່ກ່າວຄວາມມົດຈິດ
ດ້ວຍການວິວາດກັນ

ຄຳວ່າ ຄວາມລຳພອງຕົນ ຍ່ອມເປັນພູມສຳລັບຍ່ຳຍີຂອງເຂົາ ອະທິບາຍວ່າ ຄວາມ ລຳພອງຕົນ ຄື ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເປັນຄືທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເປັນຄືທຸງ ລວມຄວາມວ່າ ຄວາມລຳພອງຕົນ

ຄຳວ່າ ຍ່ອມເປັນພູມສຳລັບຍ່ຳຍີຂອງເຂົາ ອະທິບາຍວ່າ ຄວາມລຳພອງຕົນ ເປັນພູມສຳລັບຍ່ຳຍີ ຄື ສຳລັບຕັດຮອນ ສຳລັບບຽດບຽນ ສຳລັບບີບຄັ້ນ ສຳລັບກໍ່ ອັນຕະລາຍ ສຳລັບກໍ່ອຸປະສັກຂອງເຂົາ ລວມຄວາມວ່າ ຄວາມລຳພອງຕົນ ຍ່ອມເປັນພູມສຳລັບຍ່ຳຍີຂອງເຂົາ

ຄຳວ່າ ເຂົາຈຶ່ງກ່າວຄຳຖືຕົວແລະຄຳດູໝິ່ນກັນ ໄດ້ແກ່ ບຸກຄົນນັ້ນຈຶ່ງກ່າວຄຳ ຖືຕົວແລະກ່າວຄຳດູໝິ່ນ ລວມຄວາມວ່າ ເຂົາຈຶ່ງກ່າວຄຳຖືຕົວແລະຄຳດູໝິ່ນກັນ

ຄຳວ່າ ບຸກຄົນເຫັນໂທດນີ້ແລ້ວ ບໍ່ຄວນວິວາທະກັນ ອະທິບາຍວ່າ ເຫັນແລ້ວ ຄື ແນມເຫັນແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງໂທດນີ້ ໃນການຜິດຖຽງກັນຍ້ອນທິດຖິ ການໝາງໃຈກັນຍ້ອນທິດຖິ ການຍາດແຍ່ງກັນຍ້ອນທິດຖິ ການວິວາດກັນຍ້ອນທິດຖິ ການມຸ້ງຮ້າຍກັນຍ້ອນທິດຖິ ລວມຄວາມວ່າ ບຸກຄົນເຫັນໂທດນີ້ແລ້ວ

ຄຳວ່າ ບໍ່ຄວນວິວາທະກັນ ອະທິບາຍວ່າ ບໍ່ເພິ່ງກໍ່ການຜິດຖຽງກັນ ບໍ່ເພິ່ງກໍ່ການໝາງໃຈກັນ ບໍ່ເພິ່ງກໍ່ການຍາດແຍ່ງກັນ ບໍ່ເພິ່ງກໍ່ການວິວາດກັນ ບໍ່ເພິ່ງກໍ່ການມຸ້ງຮ້າຍກັນ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການຜິດຖຽງກັນ ການໝາງໃຈກັນ ການຍາດແຍ່ງກັນ ການວິວາດກັນ ການມຸ້ງຮ້າຍກັນ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບການຜິດຖຽງກັນ ການໝາງໃຈກັນ ການຍາດແຍ່ງກັນ ການວິວາດກັນ ການມຸ້ງຮ້າຍກັນແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບຸກຄົນເຫັນໂທດນີ້ແລ້ວ ບໍ່ຄວນວິວາທະກັນ

ຄຳວ່າ ຜູ້ສະຫຼາດທັງຫຼາຍ ໃນຄຳວ່າ ຍ້ອນຜູ້ສະຫຼາດທັງຫຼາຍ ບໍ່ກ່າວຄວາມມົດຈິດດ້ວຍການວິວາດກັນນັ້ນ ອະທິບາຍວ່າ ຜູ້ສະຫຼາດໃນຂັນ ສະຫຼາດໃນທາດ ສະຫຼາດໃນອາຍະຕະນະ ສະຫຼາດໃນປະຕິດຈະສະມຸບບາດ ສະຫຼາດໃນສະຕິປັດຖານ ສະຫຼາດໃນສຳມັບປະທານ ສະ

ຫຼາດໃນອິດທິບາດ ສະຫຼາດໃນອິນຊີ ສະຫຼາດໃນພະລະ ສະຫຼາດໃນໂພດຊົງ ສະຫຼາດໃນມັກ ສະຫຼາດໃນຜົນ ສະຫຼາດໃນນິບພານ

ຜູ້ສະຫຼາດເຫຼົ່ານັ້ນ ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມມົດຈິດ ຄື ຄວາມ ສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ດ້ວຍການຜິດຖຽງກັນຍ້ອນທິດຖິ ການໝາງໃຈກັນຍ້ອນທິດຖິ ການຍາດແຍ່ງກັນຍ້ອນທິດຖິ ການວິວາດກັນຍ້ອນທິດຖິ ການມຸ້ງຮ້າຍກັນຍ້ອນທິດຖິ ລວມຄວາມວ່າ ຍ້ອນຜູ້ສະຫຼາດທັງຫຼາຍ ບໍ່ກ່າວຄວາມມົດຈິດດ້ວຍການວິວາດກັນນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄວາມລຳພອງຕົນ ຍ່ອມເປັນພູມສຳລັບຍ່ຳຍີຂອງເຂົາ
ເຂົາຈຶ່ງກ່າວຄຳຖືຕົວແລະຄຳດູໝິ່ນກັນ
ບຸກຄົນເຫັນໂທດນີ້ແລ້ວ ບໍ່ຄວນວິວາທະກັນ
ຍ້ອນຜູ້ສະຫຼາດທັງຫຼາຍ ບໍ່ກ່າວຄວາມມົດຈິດ
ດ້ວຍການວິວາດກັນນັ້ນ

[໖໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄົນກ້າທີ່ໄດ້ຮັບການລ້ຽງດູດ້ວຍຂອງສະເຫວີຍຂອງພຣະຣາຊາ
ເຂົາຄຶກຄະນອງ ຢາກພົບຄົນກ້າຝ່າຍກົງກັນຂ້າມ ຍ່ອມໄດ້ພົບ ສັນໃດ
(ເຈົ້າລັດທິ ຍ່ອມໄດ້ພົບເຈົ້າລັດທິ ສັນນັ້ນ)
ຜູ້ກ້າເອີຍ ເຈົ້າລັດທິຢູ່ບ່ອນໃດ ທ່ານຈົ່ງໄປສາຈາກບ່ອນນັ້ນເທີ້ນ
ຍ້ອນກິເລດທີ່ເຄີຍມີແຕ່ກ່ອນຂອງຕະຖາຄົດ ບໍ່ໄດ້ມີເພື່ອການຮົບ

ຄຳວ່າ ຄົນກ້າ ໃນຄຳວ່າ ຄົນກ້າທີ່ໄດ້ຮັບການລ້ຽງດູດ້ວຍຂອງສະເຫວີຍຂອງພຣະຣາຊາ ໄດ້ແກ່ ຄົນກ້າ ຄື ຜູ້ກ້າຫານ ນັກສູ້ ຜູ້ບໍ່ຢ້ານ ບໍ່ຫວາດສຽວ ບໍ່ຕົກໃຈຢ້ານ ບໍ່ໜີ

ຄຳວ່າ ທີ່ໄດ້ຮັບການລ້ຽງດູດ້ວຍຂອງສະເຫວີຍຂອງພຣະຣາຊາ ໄດ້ແກ່ ໄດ້ຮັບການລ້ຽງດູ ຄື ຊຸບລ້ຽງ ເຮັດໃຫ້ຈະເລີນ ເຮັດໃຫ້ເຕີບໂຕ ດ້ວຍເຄື່ອງຂົບຄ້ຽວຂອງພຣະຣາຊາດ້ວຍເຄື່ອງສະເຫວີຍຂອງພຣະຣາຊາ ລວມຄວາມວ່າ ຄົນກ້າທີ່ໄດ້ຮັບການລ້ຽງດູດ້ວຍຂອງສະເຫວີຍຂອງພຣະຣາຊາ

ຄຳວ່າ ເຂົາຄຶກຄະນອງ ຢາກພົບຄົນກ້າຝ່າຍກົງກັນຂ້າມ ຍ່ອມໄດ້ພົບ ສັນໃດ ອະທິບາຍວ່າ ເຂົາຄຶກຄະນອງ ຮ້ອງທ້າທາຍ ຮ້ອງແຂກກຶກກ້ອງ ຢາກພົບ ຄື ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ຜູ້ກ້າຝ່າຍກົງກັນຂ້າມ ຄື ຄົນຝ່າຍກົງກັນຂ້າມ ສັດຕູຝ່າຍກົງກັນຂ້າມ ນັກປ້ຳຝ່າຍກົງກັນຂ້າມ ຍ່ອມໄດ້ພົບ ຄື ເຂົ້າພົບ ເຂົ້າໄປພົບ ລວມຄວາມວ່າ ເຂົາຄຶກຄະນອງ ຢາກພົບຄົນກ້າຝ່າຍກົງກັນຂ້າມ ຍ່ອມໄດ້ພົບ ສັນໃດ

ຄຳວ່າ ຜູ້ກ້າເອີຍ ເຈົ້າລັດທິຢູ່ບ່ອນໃດ ທ່ານຈຶ່ງໄປສາຈາກບ່ອນນັ້ນເທີ້ນ ອະທິບາຍວ່າ ເຈົ້າລັດທິນັ້ນຢູ່ບ່ອນໃດ ທ່ານຈຶ່ງໄປສາຈາກບ່ອນນັ້ນ ຄື ຈົ່ງເວັ້ນ ຈົ່ງໄປ ຈົ່ງກ້າວຫຼີກຈາກບ່ອນນັ້ນ ຍ້ອນເຂົາເປັນຜູ້ກ້າຝ່າຍກົງກັນຂ້າມ ເປັນຄົນຝ່າຍກົງກັນຂ້າມ ເປັນສັດຕູຝ່າຍ ກົງກັນຂ້າມ ເປັນນັກປ້ຳຝ່າຍກົງກັນຂ້າມຂອງທ່ານ ລວມຄວາມວ່າ ຜູ້ກ້າເອີຍ ເຈົ້າລັດທິຢູ່ບ່ອນໃດ ທ່ານຈຶ່ງໄປສາຈາກບ່ອນນັ້ນເທີ້ນ

ຄຳວ່າ ຍ້ອນກິເລດທີ່ເຄີຍມີແຕ່ກ່ອນຂອງຕະຖາຄົດ ບໍ່ໄດ້ມີເພື່ອການຮົບ ອະທິບາຍວ່າ ກິເລດເຫຼົ່າໃດ ເຊິ່ງທຳຄວາມເປັນຂ້າເສິກ ທຳຄວາມຂັດຂວາງ ທຳຄວາມເປັນສົງຄາມ ທຳຄວາມເປັນປໍລະປັກ ເມື່ອກ່ອນ ຄື ທີ່ເຫງົ້າຕົ້ນໂພ ກິເລດເຫຼົ່ານັ້ນ ບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ຕະຖາຄົດ ຄື ກິເລດເຫຼົ່ານັ້ນຕະຖາຄົດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ

ຄຳວ່າ ເພື່ອການຮົບ ໄດ້ແກ່ ເພື່ອປະໂຫຍດແກ່ການຮົບ ຄື ເພື່ອປະໂຫຍດແກ່ການຜິດຖຽງກັນ ເພື່ອປະໂຫຍດແກ່ການໝາງໃຈກັນ ເພື່ອປະໂຫຍດແກ່ການຍາດແຍ່ງກັນ ເພື່ອປະໂຫຍດແກ່ການວິວາດກັນ ເພື່ອປະໂຫຍດແກ່ການມຸ້ງຮ້າຍກັນ ລວມຄວາມວ່າ ຍ້ອນ ກິເລດທີ່ເຄີຍມີແຕ່ກ່ອນຂອງຕະຖາຄົດ ບໍ່ໄດ້ມີເພື່ອການຮົບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ

ຄົນກ້າທີ່ໄດ້ຮັບການລ້ຽງດູດ້ວຍຂອງສະເຫວີຍຂອງພຣະຣາຊາ
ເຂົາຄືກຄະນອງ ຢາກພົບຄົນກ້າຝ່າຍກົງກັນຂ້າມ ຍ່ອມໄດ້ພົບ ສັນໃດ
(ເຈົ້າລັດທິ ຍ່ອມໄດ້ພົບເຈົ້າລັດທິ ສັນນັ້ນ)
ຜູ້ກ້າເອີຍ ເຈົ້າລັດທິຢູ່ບ່ອນໃດ ທ່ານຈຶ່ງໄປສາຈາກບ່ອນນັ້ນເທີ້ນ
ຍ້ອນກິເລດທີ່ເຄີຍມີແຕ່ກ່ອນຂອງຕະຖາຄົດ ບໍ່ໄດ້ມີເພື່ອການຮົບ

[໘໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຊົນເຫຼົ່າໃດຖືທິດຖິແລ້ວວິວາທະກັນ
ແລະກ່າວອ້າງວ່າ ນີ້ເທົ່ານັ້ນຈິງ
ທ່ານຈົ່ງເວົ້າກັບຊົນເຫຼົ່ານັ້ນວ່າ ກິເລດທີ່ເປັນຂ້າເສິກກັນ
ເມື່ອວາທະເກີດ ບໍ່ມີໃນທຳວິໄນນີ້
ວ່າດ້ວຍວິວາທະກັນຍ້ອນທິດຖິ

ຄຳວ່າ ຊົນເຫຼົ່າໃດຖືທິດຖິແລ້ວວິວາດກັນ ອະທິບາຍວ່າ ຊົນເຫຼົ່າໃດ ຈັບ ຍຶດ ຖື ຍຶດໝັ້ນຖືໝັ້ນ ທິດຖິແນວໃດແນວໜຶ່ງໃນທິດຖິ ໖໒ ແລ້ວ ຍ່ອມວິວາດກັນ ຄື ຍ່ອມກໍ່ການຜິດຖຽງກັນ ກໍ່ການໝາງໃຈກັນ ກໍ່ການຍາດແຍ່ງກັນ ກໍ່ການວິວາດກັນ ກໍ່ການ ມຸ້ງຮ້າຍກັນ ໂດຍເວົ້າວ່າ ທ່ານບໍ່ຮູ້ທຳວິໄນນີ້ ເຮົາຮູ້ທຳວິໄນນີ້ ທ່ານຈັກຮູ້ທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ເຮົາປະຕິບັດຖືກຕ້ອງ ຄຳຂອງເຮົາມີປະໂຫຍດ ຄຳຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານ

ກໍເວົ້າພາຍຫຼັງ ຄຳທີ່ຄວນເວົ້າພາຍຫຼັງທ່ານກັບເວົ້າກ່ອນ ຄຳທີ່ທ່ານໃຊ້ສະເໝີກັບຕິດຂັດ ວາທະຂອງທ່ານເຮົາຫັກລ້າງໄດ້ແລ້ວ ເຮົາປາບປາມທ່ານໄດ້ແລ້ວ ທ່ານຈົ່ງທ່ຽວໄປເພື່ອປົດວາທະ ຫຼືຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ ລວມຄວາມວ່າ ຊົນເຫຼົ່າໃດ ຖືທິດຖິແລ້ວວິວາດກັນ

ຄຳວ່າ ແລະກ່າວອ້າງວ່າ ນີ້ເທົ່ານັ້ນຈິງ ອະທິບາຍວ່າ ກ່າວອ້າງ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຯລຯ ໂລກບໍ່ທ່ຽງ ຯລຯ ກ່າວອ້າງ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງວ່າ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ແລະກ່າວອ້າງວ່າ ນີ້ເທົ່ານັ້ນຈິງ

ຄຳວ່າ ທ່ານຈົ່ງເວົ້າກັບຊົນເຫຼົ່ານັ້ນວ່າ ກິເລດທີ່ເປັນຂ້າເສິກກັນ ເມື່ອວາທະເກີດ ບໍ່ມີໃນທຳວິໄນນີ້ ອະທິບາຍວ່າ ທ່ານຈົ່ງເວົ້າກັບເຈົ້າລັດທິເຫຼົ່ານັ້ນ ຄື ຕອບໂຕ້ວາທະດ້ວຍວາທະ ຕອບໂຕ້ການຂົ່ມດ້ວຍການຂົ່ມ ຕອບໂຕ້ການເຊີດຊູດ້ວຍການເຊີດຊູ ຕອບໂຕ້ຄວາມພິເສດດ້ວຍຄວາມພິເສດ ຕອບໂຕ້ຄວາມພິເສດໃຫ້ຍິ່ງຂຶ້ນໄປດ້ວຍຄວາມພິເສດໃຫ້ຍິ່ງຂຶ້ນໄປ ຕອບໂຕ້ຄວາມຜູກມັດດ້ວຍຄວາມຜູກມັດ ຕອບໂຕ້ຄວາມຜ່ອນຄາຍດ້ວຍຄວາມຜ່ອນຄາຍ ຕອບໂຕ້ການຕັດຮອນດ້ວຍການຕັດຮອນ ຕອບໂຕ້ການຂະນາບວາທະດ້ວຍການຂະນາບວາທະ ຍ້ອນຄົນເຫຼົ່ານັ້ນເປັນຜູ້ກ້າຝ່າຍກົງກັນຂ້າມ ເປັນຄົນຝ່າຍກົງກັນຂ້າມ ເປັນສັດຕູຝ່າຍກົງກັນຂ້າມ ເປັນນັກປ້ຳຝ່າຍກົງກັນຂ້າມຂອງທ່ານ ລວມຄວາມວ່າ ທ່ານຈົ່ງເວົ້າກັບຊົນເຫຼົ່ານັ້ນວ່າ ຯລຯ ບໍ່ມີໃນທຳວິໄນນີ້

ຄຳວ່າ ກິເລດທີ່ເປັນຂ້າເສິກກັນ ເມື່ອວາທະເກີດ ອະທິບາຍວ່າ ເມື່ອວາທະເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດແລ້ວ ກິເລດທີ່ເປັນຂ້າເສິກ ຄື ທີ່ຂັດແຍ່ງກັນ ທີ່ເປັນສົງຄາມກັນ ທີ່ເປັນປໍລະປັກກັນເຫຼົ່າໃດ ເພິ່ງກໍ່ການຜິດຖຽງກັນ ກໍ່ການໝາງໃຈກັນ ກໍ່ການຍາດແຍ່ງກັນ ກໍ່ການວິວາດກັນ ກໍ່ການມຸ້ງຮ້າຍກັນ ກິເລດເຫຼົ່ານັ້ນ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ພຣະອະຣະຫັນ ໄດ້ແກ່ ກິເລດເຫຼົ່ານັ້ນພຣະອະຣະຫັນ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ທ່ານຈົ່ງເວົ້າກັບຊົນເຫຼົ່ານັ້ນວ່າ ກິເລດທີ່ເປັນຂ້າເສິກກັນ ເມື່ອວາທະເກີດ ບໍ່ມີໃນທຳວິໄນນີ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຊົນເຫຼົ່າໃດຖືທິດຖິແລ້ວວິວາທະກັນ
ແລະກ່າວອ້າງວ່າ ນີ້ເທົ່ານັ້ນຈິງ
ທ່ານຈົ່ງເວົ້າກັບຊົນເຫຼົ່ານັ້ນວ່າ ກິເລດທີ່ເປັນຂ້າເສິກກັນ
ເມື່ອວາທະເກີດ ບໍ່ມີໃນທຳວິໄນນີ້

[໑໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

พระอะระหันเหຼົ່າໃດ ກຳຈັດເສນາໄດ້ແລ້ວ
ບໍ່ເອົາທິດຖິໄປກະທົບທິດຖິ ທ່ຽວໄປ
พระອະระຫັນເຫຼົ່າໃດໃນທຳວິໄນນີ້
ບໍ່ມີຄວາມຖືໝັ້ນສິ່ງນີ້ວ່າ ປະເສີດ
ປະສູຣະເອີຍ ທ່ານຈະເພິ່ງໄດ້ອັນໃດ ໃນພຣະອະຣະຫັນເຫຼົ່ານັ້ນ

## ວ່າດ້ວຍເສນາມານ

ຄຳວ່າ ພຣະອະຣະຫັນເຫຼົ່າໃດ ກຳຈັດເສນາໄດ້ແລ້ວ ຯລຯ ທ່ຽວໄປ ອະທິບາຍວ່າ ເສນາມານ ຕັດຮຽກວ່າ ເສນາ ກາຍທຸດຈະຣິດ ຊື່ວ່າ ເສນາມານ ວະຈີທຸດຈະຣິດ ຯລຯ ມະໂນທຸດຈະ ຣິດ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖຳພະ ຯລຯ ສາຣຳພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າເສນາມານ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ກິເລດການເຮົາຮຽກວ່າເສນາກອງທີ ໑ ຂອງທ່ານ
ຄວາມບໍ່ຍິນດີເຮົາຮຽກວ່າເສນາກອງທີ ໒ ແລະ ອື່ນ ໆ
ຄົນຢ້ານເອົາຊະນະເສນານັ້ນບໍ່ໄດ້
ແຕ່ຄົນກ້າ ເມື່ອຊະນະໄດ້ແລ້ວຍ່ອມໄດ້ຄວາມສຸກ

ເມື່ອໃດເສນາມານທັງໝົດ ແລະກິເລດທີ່ສ້າງເສນາຝ່າຍກົງກັນຂ້າມທັງປວງ ຖືກຜູ້ມີປັນຍາພິຊິດແລະເຮັດໃຫ້ພ່າຍແພ້ ທຳລາຍ ກຳຈັດ ເຮັດໃຫ້ບໍ່ສູ້ໜ້າແລ້ວ ດ້ວຍອະຣິຍະມັກ ໔ ເມື່ອນັ້ນ ຜູ້ນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ເປັນຜູ້ກຳຈັດເສນາໄດ້ແລ້ວ

ຄຳວ່າ ເຫຼົ່າໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ທ່ຽວໄປ ໄດ້ແກ່ ທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ພຣະອະຣະຫັນເຫຼົ່າໃດ ກຳຈັດເສນາໄດ້ແລ້ວ ຯລຯ ທ່ຽວໄປ

ຄຳວ່າ ບໍ່ເອົາທິດຖິໄປກະທົບທິດຖິ ອະທິບາຍວ່າ ທິດຖິ ໖໒ ພຣະອະຣະຫັນເຫຼົ່າໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກເຜົາດ້ວຍໄຟຄືຍານແລ້ວ ພຣະອະຣະຫັນເຫຼົ່ານັ້ນບໍ່ກະທົບ ຄື ບໍ່ກະແທກ ບໍ່ບັ່ນທອນ ບໍ່ທຳລາຍທິດຖິດ້ວຍທິດຖິ ລວມຄວາມວ່າ ບໍ່ເອົາທິດຖິໄປກະທົບທິດຖິ

ຄຳວ່າ ປະສູຣະເອີຍ ທ່ານຈະເພິ່ງໄດ້ອັນໃດ ໃນພຣະອະຣະຫັນເຫຼົ່ານັ້ນ ອະທິບາຍວ່າ ປະສູຣະ ຜູ້ເປັນຄົນຝ່າຍກົງກັນຂ້າມ ຜູ້ເປັນສັດຕູຝ່າຍກົງກັນຂ້າມ ຜູ້ເປັນນັກປ້ຳຝ່າຍກົງກັນຂ້າມ ທ່ານຈະໄດ້ອັນໃດ ໃນພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນ ລວມຄວາມວ່າ ປະສູຣະເອີຍ ທ່ານຈະເພິ່ງໄດ້ອັນໃດ ໃນພຣະອະຣະຫັນເຫຼົ່ານັ້ນ

ຄຳວ່າ ພຣະອະຣະຫັນເຫຼົ່າໃດໃນທຳວິໄນນີ້ ບໍ່ມີຄວາມຖືໝັ້ນສິ່ງນີ້ວ່າ ຍອດຢ້ຽມ ອະທິບາຍວ່າ ພຣະອະຣະຫັນຕະຂີນາສົບເຫຼົ່າໃດບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເຊິ່ງຄວາມຖື ຄື ຄວາມຍຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອວ່າ ສິ່ງນີ້ ຢ້ຽມ ຄື ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ໄດ້ແກ່ ຄວາມຖືໝັ້ນນັ້ນ ພຣະອະຣະຫັນເຫຼົ່າໃດ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ພຣະອະຣະຫັນເຫຼົ່າໃດໃນທຳວິໄນນີ້ ບໍ່ມີຄວາມຖືໝັ້ນສິ່ງນີ້ວ່າ ປະເສີດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພຣະອະຣະຫັນເຫຼົ່າໃດ ກຳຈັດເສນາໄດ້ແລ້ວ
ບໍ່ເອົາທິດຖິໄປກະທົບທິດຖິ ທ່ຽວໄປ
ພຣະອະຣະຫັນເຫຼົ່າໃດໃນທຳວິໄນນີ້
ບໍ່ມີຄວາມຖືໝັ້ນສິ່ງນີ້ວ່າ ປະເສີດ
ປະສູຣະເອີຍ ທ່ານຈະເພິ່ງໄດ້ອັນໃດ ໃນພຣະອະຣະຫັນເຫຼົ່ານັ້ນ

[໖໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ອັນໜຶ່ງ ທ່ານນຶກຢູ່ມາແລ້ວ ທ່ານຄິດທິດຖິທັງຫຼາຍດ້ວຍໃຈ
ມາເຖິງການແຂ່ງຄູ່ກັບເຮົາຜູ້ມີປັນຍາເຄື່ອງກຳຈັດແລ້ວ
ຍ່ອມບໍ່ສາມາດທຽມທັນໄດ້ເລີຍ
ວ່າດ້ວຍພຣະປັນຍາຂອງພຣະພຸດທະເຈົ້າ

ຄຳວ່າ ອັນໜຶ່ງ ໃນຄຳວ່າ ອັນໜຶ່ງ ທ່ານນຶກຢູ່ມາແລ້ວ ເປັນບົດສົນທິ ເປັນຄຳເຊື່ອມບົດ ເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ອັນໜຶ່ງ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານນຶກຢູ່ມາແລ້ວ ໄດ້ແກ່ ທ່ານນຶກ ຕອງ ດຳຣິຢູ່ ຄື ນຶກ ຕອງ ດຳຣິຢູ່ແນວນີ້ວ່າ ເຮົາຈັກມີໄຊບໍນໍ ຈັກພ່າຍແພ້ບໍນໍ ຈັກທຳການຂົ່ມແນວໃດ ຈັກທຳການເຊີດຊູແນວໃດ ຈັກເຮັດລັດທິຂອງເຮົາໃຫ້ເລີດລອຍແນວໃດ ຈັກເຮັດໃຫ້ພິເສດແນວໃດ ຈັກເຮັດໃຫ້ພິເສດຍິ່ງຂຶ້ນໄປແນວໃດ ຈັກທຳການຜູກມັດແນວໃດ ຈັກທຳການຜ່ອນຄາຍແນວໃດ ຈັກທຳການຕັດຮອແນວໃດ

ຈັກທຳການຂະນາບວາທະໄດ້ແນວໃດ ມາແລ້ວ ຄື ເຂົ້າມາແລ້ວ ເຖິງພ້ອມແລ້ວ ມາພົບພໍ້ກັບເຮົາແລ້ວ ລວມຄວາມວ່າ ອັນໜຶ່ງ ທ່ານນຶກຢູ່ມາແລ້ວ

ຄຳວ່າ ທ່ານຄິດເຖິງທິດຖິທັງຫຼາຍດ້ວຍໃຈ ອະທິບາຍວ່າ

ຄຳວ່າ ໃຈ ໄດ້ແກ່ ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດ ທີ່ເກີດຂຶ້ນຈາກຜັດສະເປັນຕົ້ນນັ້ນ ທ່ານເຝົ້າ ແຕ່ຄິດ ຄິດເຖິງແຕ່ທິດຖິດ້ວຍໃຈວ່າ ໂລກທ່ຽງ ຯລຯ ໂລກບໍ່ທ່ຽງ ຯລຯ ຫຼືວ່າ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ລວມຄວາມວ່າ ທ່ານຄິດເຖິງທິດຖິທັງຫຼາຍດ້ວຍໃຈ

ຄຳວ່າ ທ່ານ ຯລຯ ມາເຖິງການແຂ່ງຄູ່ກັບເຮົາຜູ້ມີປັນຍາເຄື່ອງກຳຈັດແລ້ວ ຍ່ອມບໍ່ສາມາດທຽມທັນໄດ້ເລີຍ ອະທິບາຍວ່າ ປັນຍາ ຕັດຮຽກວ່າ ເຄື່ອງກຳຈັດ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ

ຍ້ອນເຫດໃດ ປັນຍາຈຶ່ງຕັດຮຽກວ່າ ເຄື່ອງກຳຈັດ ຍ້ອນປັນຍານັ້ນເປັນເຄື່ອງກຳຈັດຊຳຣະ ລ້າງແລະຊັກຟອກກາຍທຸດຈະຣິດ ຯລຯ ວະຈີທຸດຈະຣິດ ຯລຯ ເປັນເຄື່ອງກຳຈັດຊຳຣະ ລ້າງແລະຊັກຟອກອະກຸສະລາພິສັງຂານທຸກປະເພດ

ອີກໄນໜຶ່ງ ສຳມາທິດຖິ ເປັນເຄື່ອງກຳຈັດ ຊຳຣະ ລ້າງແລະຊັກຟອກມິດສາທິດຖິ ສຳມາສັງກັບປະເປັນເຄື່ອງກຳຈັດມິດສາສັງກັບປະ ຯລຯ ສຳມາວິມຸດຕິ ເປັນເຄື່ອງກຳຈັດ ຊຳຣະລ້າງແລະຊັກຟອກມິດສາວິມຸດຕິ

ອີກໄນໜຶ່ງ ອະຣິຍະມັກມີອົງ ໘ ເປັນເຄື່ອງກຳຈັດ ຊຳຣະ ລ້າງແລະຊັກຟອກ ກິເລດທຸກຂະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ເປັນເຄື່ອງກຳຈັດ ຊຳຣະ ລ້າງແລະຊັກຟອກ ອະກຸສະລາພິສັງຂານທຸກປະເພດ

ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປເປັນໄປພ້ອມ ພຽບພ້ອມດ້ວຍທຳເຄື່ອງຊຳຣະລ້າງເຫຼົ່ານີ້ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊື່ວ່າຜູ້ມີປັນຍາເຄື່ອງກຳຈັດ ພຣະອົງຊົງກຳຈັດຄວາມກຳໜັດ ໄດ້ແລ້ວ ກຳຈັດບາບໄດ້ແລ້ວກຳຈັດກິເລດໄດ້ແລ້ວ ກຳຈັດຄວາມຮ້ອນຮົນໄດ້ແລ້ວ ລວມຄວາມວ່າ ຜູ້ມີປັນຍາເຄື່ອງກຳຈັດ

ຄຳວ່າ ທ່ານມາເຖິງການແຂ່ງຄູ່ກັບເຮົາຜູ້ມີປັນຍາເຄື່ອງກຳຈັດແລ້ວ ຍ່ອມບໍ່ສາມາດທຽມທັນໄດ້ເລີຍ ອະທິບາຍວ່າ ປະສູຣະປະຣິພາຊົກ ບໍ່ສາມາດແຂ່ງຄູ່ ຄື ຈັບຄູ່ ແຂ່ງຂັນ ສົນທະນາປາໄສ ເຖິງການສົນທະນາກັບພຣະຜູ້ມີພຣະພາກພຸດທະເຈົ້າ ຜູ້ມີປັນຍາເຄື່ອງກຳຈັດໄດ້ເລີຍ ຂໍ້ນັ້ນຍ້ອນເຫດໃດ ຍ້ອນປະສູຣະປະຣິພາຊົກ ຊົ່ວ ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ສ່ວນພຣະຜູ້ມີພຣະພາກເຈົ້າ ຊົງລ້ຳເລີດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ

ປະສູຣະປະຣິພາຊົກ ບໍ່ສາມາດມາແຂ່ງຄູ່ ຄື ຈັບຄູ່ ແຂ່ງຂັນ ສົນທະນາ ປາໄສ ເຖິງການສົນທະນາກັບພຣະຜູ້ມີພຣະພາກພຸດທະເຈົ້າ ຜູ້ມີປັນຍາເຄື່ອງກຳຈັດໄດ້ ປຽບເໝືອນກະຕ່າຍ ບໍ່ອາດມາແຂ່ງຄູ່ ຄື ຈັບຄູ່ແຂ່ງຂັນກັບຊ້າງໃຫຍ່ກຳລັງຕົກມັນໄດ້ ໝາຈອກແກ່ ໆ ບໍ່ອາດມາແຂ່ງຄູ່ຄື ຈັບຄູ່ຕໍ່ສູ້ກັບຣາດຊະສີ ຜູ້ເປັນເຈົ້າແຫ່ງພົງໄພໄດ້ ລູກງົວ ຕົວນ້ອຍ ໆ ຍັງບໍ່ຢ່ານົມ ບໍ່ອາດມາແຂ່ງຄູ່ ຄື ຈັບຄູ່ແຂ່ງຂັນກັບງົວເຖິກ ເຊິ່ງມີກຳລັງຫຼາຍໄດ້ ກາບໍ່ອາດມາແຂ່ງຄູ່ ຄື ຈັບຄູ່ແຂ່ງຂັນກັບພະຍາຄຸດນາມວ່າ ເວນໄຕໄດ້ ຄົນຈັນທານບໍ່ສາມາດມາແຂ່ງຄູ່ ຄື ຈັບຄູ່ຕໍ່ສູ້ຮົບກັບພຣະເຈົ້າຈັກກະພັດໄດ້ ຜີສາດກະຈອກບໍ່ອາດມາແຂ່ງຄູ່ ຄື ຈັບຄູ່ຕໍ່ກອນກັບພຣະອິນຜູ້ຊົງເປັນເທວະຣາຊາໄດ້

ຂໍ້ນັ້ນ ເປັນຍ້ອນເຫດໃດ ຍ້ອນປະສູຣະປະຣິພາຊົກ ມີປັນຍາຊົ່ວ ມີປັນຍາຊາມ ມີປັນຍາຕ່ຳຊາມ ມີປັນຍາໜ້າຮັງກຽດ ມີປັນຍາຫຍາບຊ້າ ມີປັນຍາຕ່ຳຕ້ອຍ

ສ່ວນພຣະຜູ້ມີພຣະພາກເຈົ້າມີພຣະປັນຍາຫຼາຍ ມີພຣະປັນຍາກວ້າງຂວາງ ມີພຣະປັນຍາອາດຫານ ມີພຣະປັນຍາສັບໄວ ມີພຣະປັນຍາສຽບຄົມ ມີພຣະປັນຍາເພີກຖອນກິເລດ ຊົງຄວາມສະຫຼາດໃນປະເພດແຫ່ງປັນຍາ ມີພຣະຍານແຕກສານ ຊົງບັນລຸປະຕິສຳພິທາ ບັນລຸເວສາຣັດຊະຍານ ໔ ເປັນຜູ້ຊົງທົດສະພົນລະຍານ ຊົງເປັນບຸຣຸດອົງອາດ ຊົງເປັນບຸຣຸດປານ ຣາດຊະສີ ຊົງເປັນບຸຣຸດເປັນຄືນາກ ຊົງເປັນບຸຣຸດອາຊາໄນ ຊົງເປັນບຸຣຸດຜູ້ນຳທຸຣະ ມີພຣະຍານຫາທີ່ສຸດບໍ່ໄດ້ມີພຣະເດດຫາທີ່ສຸດບໍ່ໄດ້ ມີພຣະຍົດຫາທີ່ສຸດບໍ່ໄດ້ ຊົງມັ່ງຄັ່ງມີຊັບຫຼາຍ ມີປັນຍາເປັນຊັບ ຊົງເປັນຜູ້ນຳ ເປັນຜູ້ນຳໄປໂດຍວິເສດ ເປັນຜູ້ຕາມແນະນຳ ຊົງໃຫ້ຮູ້ຈັກປະໂຫຍດ ໃຫ້ພິນິດພິຈາລະນາ ຊົງເພ່ງປະໂຫຍດ ຊົງເຮັດໃຫ້ເຫຼື້ອມໃສໄດ້ ພຣະຜູ້ມີພຣະ ພາກພຣະອົງນັ້ນ ຊົງເຮັດມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊົງເຮັດມັກທີ່ຍັງບໍ່ເກີດພ້ອມໃຫ້ເກີດພ້ອມ ຕັດບອກມັກທີ່ຍັງບໍ່ໄດ້ຕັດບອກ ຊົງຮູ້ຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ແລະສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ດຳເນີນໄປຕາມມັກ ຢູ່ໃນບັດນີ້ ຈະພຽບພ້ອມດ້ວຍສີລາທິຄຸນ ໃນພາຍຫຼັງ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ມີພຣະຈັກຂຸ ມີພຣະຍານ ມີພຣະທຳ ເປັນຄືພຣະພົມ ຕັດ ບອກ ນຳຄວາມໝາຍອອກມາ ປະທານອະມະຕະທຳ ເປັນພຣະທຳສາມີ ເປັນພຣະຕະຖາຄົດ ບໍ່ມີສິ່ງທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຍັງບໍ່ຊົງຮູ້ ບໍ່ຊົງເຫັນ ບໍ່ຊົງຮູ້ແຈ້ງ ບໍ່ຊົງເຮັດໃຫ້ແຈ້ງ ບໍ່ໄດ້ຊົງຖືກຕ້ອງດ້ວຍພຣະປັນຍາ ທຳທັງປວງລວມທັງອະດີດ ອະນາຄົດແລະປັດຈຸບັນ ຍ່ອມມາ ສ຺ູ່ຄອງສະເພາະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ໂດຍອາການທັງປວງ ທຳມະດາປະໂຫຍດທີ່ຄວນແນະນຳແນວໃດແນວໜຶ່ງເປັນທຳທີ່ຄວນຮູ້ມີຢູ່ ຄື ປະໂຫຍດຕົນ ປະໂຫຍດຜູ້ອື່ນຫຼືປະໂຫຍດທັງສອງຝ່າຍ ປະໂຫຍດໃນພົບປັດຈຸບັນຫຼືປະໂຫຍດໃນພົບໜ້າ ປະໂຫຍດຕື້ນຫຼືປະໂຫຍດເລິກ ປະໂຫຍດລີ້ລັບຫຼືປະໂຫຍດປິດບັງ ປະໂຫຍດທີ່ຄວນແນະນຳຫຼືປະໂຫຍດທີ່ແນະນຳແລ້ວ ປະໂຫຍດທີ່ບໍ່ມີໂທດຫຼືປະໂຫຍດທີ່

ບໍ່ມີກິເລດ ປະໂຫຍດທີ່ຜ່ອງແຜ້ວຫຼືປະໂຫຍດຢ່າງຍິ່ງ ປະໂຫຍດທັງໝົດນັ້ນຍ່ອມເປັນໄປ ພາຍໃນພຣະພຸດທະຍານ

ກາຍຍະກຳ ວະຈີກຳ ມະໂນກຳທຸກຢ່າງ ຍ່ອມເປັນໄປຕາມພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ບໍ່ຕິດຂັດໃນອະດີດ ອະນາຄົດ ປັດຈຸບັນ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳ ເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນບົດທຳທີ່ຄວນແນະນຳ ທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານທຳເຫຼົ່ານັ້ນ ຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນ ເໝືອນເມື່ອຊັ້ນແຫ່ງຜະອົບ ໘ ຊັ້ນເຕັງກັນແຈບພໍດີ ຊັ້ນຜະອົບດ້ານລຸ່ມກໍບໍ່ເກີນດ້ານເທິງ ຊັ້ນຜະອົບດ້ານເທິງ ກໍບໍ່ເກີນດ້ານລຸ່ມ ຊັ້ນຜະອົບທັງ ໘ ຊັ້ນຍ່ອມວາງປະກົບກັນທີ່ສ່ວນສຸດໂດຍຮອບຂອງກັນແລະກັນ ສັນໃດ ບົດທຳທີ່ຄວນແນະນຳ ແລະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ກໍຕັ້ງຢູ່ໃນສ່ວນສຸດໂດຍຮອບຂອງກັນແລະກັນ ສັນນັ້ນຄືກັນ ບົດທຳທີ່ຄວນແນະນຳ ມີຢູ່ພຽງໃດ ພຣະຍານກໍມີຢູ່ພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນກວ່າບົດທຳທີ່ຄວນແນະນຳ ທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ ບໍ່ເກີນກວ່າພຣະຍານທຳ ເຫຼົ່ານັ້ນຍ່ອມຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າຍ່ອມເປັນໄປໃນທຳທັງປວງ

ທຳທັງປວງນັບເນື່ອງດ້ວຍຄວາມນຶກ ນັບເນື່ອງດ້ວຍຄວາມຫວັງ ນັບເນື່ອງດ້ວຍ ມະນະສິການ ນັບເນື່ອງດ້ວຍຈິດຕຸບບາດຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງ ພຣະຜູ້ມີພຣະພາກພຸດທະເຈົ້າຍ່ອມເປັນໄປໃນສັດທັງປວງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ອັດທະຍາໄສ ອະນຸໄສ ຈະຣິດ ອະທິມຸດຕິ ຂອງເຫຼົ່າສັດທຸກຈຳພວກ ຊົງຮູ້ຈັກເຫຼົ່າສັດ ຜູ້ມີກິເລດເປັນຄືທຸລີໜ້ອຍໃນປັນຍາຈັກຂຸ ມີກິເລດເປັນຄືທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກເປັນພັບພະສັດເປັນອະພັບພະສັດ ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍ່ອມເປັນໄປພາຍໃນພຣະພຸດທະຍານ ປາແລະເຕົ່າຊະນິດໃດຊະນິດໜຶ່ງ ລວມທັງປາຕິມິ ປາຕິມິງຄະລະ ແລະປາຕິມິຕິມິງຄະລະ ຍ່ອມເປັນໄປຢູ່ພາຍໃນມະຫາສະມຸດ ສັນໃດ ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍ່ອມເປັນໄປພາຍໃນພຣະຍານຂອງພຣະ ພຸດທະເຈົ້າ ສັນນັ້ນຄືກັນ ນົກຊະນິດໃດຊະນິດໜຶ່ງ ລວມທັງຄຸດນາມວ່າເວນໄຕ ຍ່ອມບິນໄປໃນຫ້ອງແຫ່ງອາກາສ ສັນໃດ ພຣະພຸດທະສາວົກທັງຫຼາຍ ຜູ້ສະເໝີກັບພຣະສາຣີບຸດດ້ວຍປັນຍາ ຍ່ອມເປັນໄປໃນສ່ວນ

ແຫ່ງພຣະພຸດທະຍານ ສັນນັ້ນຄືກັນ ພຣະພຸດທະຍານຍ່ອມແຜ່ຄອບຄຸມປັນຍາຂອງເທວະດາ ແລະມະນຸດຢູ່

ເຫຼົ່າບັນດິດຜູ້ເປັນກະສັດ ເປັນພາມ ເປັນຄະຫະບໍດີ ເປັນສະມະນະ ຜູ້ມີປັນຍາລະອຽດ ຮູ້ວາທະຂອງຜູ້ອື່ນ ເໝືອນນາຍຂະມັງທະນູສາມາດຍິງເນື້ອຊາຍໄດ້ ຄືດັ່ງວ່າຈະທ່ຽວທຳລາຍທິດ ຖິຜູ້ອື່ນດ້ວຍປັນຍາຕົນ ບັນດິດເຫຼົ່ານັ້ນພາກັນປຸງແຕ່ງບັນຫາ ຍ່ອມເຂົ້າໄປຫາພຣະຕະຖາຄົດ ແລ້ວ ທູນຖາມບັນຫາທີ່ລີ້ລັບແລະປິດບັງ ບັນຫາເຫຼົ່ານັ້ນ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງ ແລະຕັດແກ້ແລ້ວ ເປັນບັນຫາມີເຫດໃຫ້ຊົງສະແດງ ບັນດິດເຫຼົ່ານັ້ນຖືກດຶງດູດດ້ວຍການວິສັດຊະ ນາບັນຫາ ຈຶ່ງເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮຸ່ງເຮືອງຍິ່ງດ້ວຍ ພຣະປັນຍາໃນໝູ່ຄົນເຫຼົ່ານັ້ນໂດຍແທ້ແລ ລວມຄວາມວ່າ ທ່ານ ຯລຯ ມາເຖິງການແຂ່ງ ຄູ່ກັບ ເຮົາຜູ້ມີປັນຍາເຄື່ອງກຳຈັດແລ້ວ ຍ່ອມບໍ່ສາມາດທຽມທັນໄດ້ເລີຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະ ພາກເຈົ້າຈຶ່ງຕັດວ່າ

ອັນໜຶ່ງ ທ່ານນຶກຢູ່ມາແລ້ວ ທ່ານຄິດທິດຖິທັງຫຼາຍດ້ວຍໃຈ
ມາເຖິງການແຂ່ງຄູ່ກັບເຮົາຜູ້ມີປັນຍາເຄື່ອງກຳຈັດແລ້ວ
ຍ່ອມບໍ່ສາມາດທຽມທັນໄດ້ເລີຍ

**ປະສູຣະສຸດຕະນິດເທດທີ ໘ ຈົບ**

# ໙. ມາຄັນທິຍະສຸດຕະນິດເທດ

## ອະທິບາຍມາຄັນທິຍະສູດ
## ວ່າດ້ວຍເມຖຸນທຳ

ພຣະສາຣີບຸດເຖຣະຈະກ່າວອະທິບາຍມາຄັນທິຍະສູດ ດັ່ງຕໍ່ໄປນີ້

[໗໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍ້ອນເຫັນນາງຕັນຫາ ນາງອໍຣະດີ ແລະນາງຣາຄາ
ກໍບໍ່ໄດ້ມີຄວາມພໍໃຈໃນເມຖຸນທຳ
ຈັກມີຄວາມພໍໃຈ ຍ້ອນເຫັນເຮືອນຮ່າງ
ທີ່ເຕັມໄປດ້ວຍປັດສາວະແລະອຸດຈາຣະນີ້ແນວໃດໄດ້ນໍ
ເຮົາບໍ່ປາຖະໜາຈະຖືກຕ້ອງເຮືອນຮ່າງນາງແມ່ນດ້ວຍຕີນ

ຄຳວ່າ ຍ້ອນເຫັນນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ກໍບໍ່ໄດ້ມີຄວາມ ພໍໃຈໃນເມຖຸນທຳ ອະທິບາຍວ່າ ຍ້ອນເຫັນ ຄື ແນມເຫັນເຫຼົ່າທິດາມານ ໄດ້ແກ່ ນາງຕັນຫາ ນາງອໍຣະດີແລະນາງຣາຄາ ກໍບໍ່ໄດ້ມີຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກໃນເມຖຸນທຳ ລວມຄວາມວ່າ ຍ້ອນເຫັນນາງຕັນຫາ ນາງອໍຣະດີ ແລະນາງຣາຄາ ກໍບໍ່ໄດ້ມີຄວາມພໍໃຈໃນເມຖຸນທຳ

ຄຳວ່າ ຈັກມີຄວາມພໍໃຈ ຍ້ອນເຫັນເຮືອນຮ່າງທີ່ເຕັມໄປດ້ວຍປັດສາວະແລະ ອຸດຈາຣະນີ້ແນວໃດໄດ້ນໍ ເຮົາບໍ່ປາຖະໜາຈະຖືກຕ້ອງເຮືອນຮ່າງນາງແມ່ນດ້ວຍຕີນ ອະທິບາຍວ່າ ຈັກມີຄວາມພໍໃຈ ຍ້ອນເຫັນເຮືອນຮ່າງທີ່ເຕັມໄປດ້ວຍປັດສາວະ ອຸດຈາຣະ ເສມຫະ ເລືອດ ມີກະດູກເປັນໂຄງ ມີເອັນເປັນເຄື່ອງຜູກພັນ ມີເລືອດແລະຊີ້ນເປັນເຄື່ອງສາບທາ ຫໍ່ຫຸ້ມດ້ວຍໜັງ ປິດບັງດ້ວຍຜິວໜັງ ມີຮູນ້ອຍຮູໃຫຍ່ ໄຫຼເຂົ້າອອກຢູ່ສະເໝີ ມີໝູ່ໜອນແຝງຕົວຢູ່ ເຕັມໄປດ້ວຍມົນທິນໂທດຕ່າງ ໆ ນີ້ ແນວໃດໄດ້ນໍ ເຮົາບໍ່ປາຖະໜາ ຈະຢຽບດ້ວຍຕີນ ການສັງວາສ ຫຼື ການສະມາຄົມ ຈັກມີມາຈາກໃສໄດ້ ລວມຄວາມວ່າ ຈັກມີຄວາມພໍໃຈ ຍ້ອນເຫັນເຮືອນຮ່າງທີ່ເຕັມໄປດ້ວຍປັດສາວະ ແລະອຸດຈາຣະນີ້ແນວໃດໄດ້ນໍ ເຮົາບໍ່ປາຖະໜາຈະຖືກຕ້ອງເຮືອນຮ່າງນາງແມ່ນດ້ວຍຕີນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ຍ້ອນເຫັນນາງຕັນຫາ ນາງອໍຣະດີ ແລະນາງຣາຄາ
ກໍບໍ່ໄດ້ມີຄວາມພໍໃຈໃນເມຖຸນທຳ
ຈັກມີຄວາມພໍໃຈ ຍ້ອນເຫັນເຮືອນຮ່າງ

ທີ່ເຕັມໄປດ້ວຍປັດສາວະແລະອຸດຈາຣະນີ້ແນວໃດໄດ້ນໍ
ເຮົາບໍ່ປາຖະໜາຈະຖືກຕ້ອງເຮືອນຮ່າງນາງແມ່ນດ້ວຍຕີນ

[໗໑] (ມາຄັນທິຍະພາມທູນຖາມວ່າ)

ຫາກທ່ານບໍ່ປາຖະໜານາຣີຜູ້ເປັນອິດຖີຣັດຕະນະເຊັ່ນນີ້
ທີ່ພຣະຣາຊາຜູ້ເປັນຈອມຄົນຈຳນວນຫຼາຍພາກັນປາຖະໜາ
ທ່ານຈະກ່າວທິດຖິ ສີນ ຂໍ້ວັດ ຊີວິດ
ແລະການອຸບັດຂຶ້ນໃນພົບ ວ່າເປັນແນວໃດ

[໗໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມາຄັນທິຍະ)

ການຕົກລົງໃຈໃນທຳທັງຫຼາຍແລ້ວຖືໝັ້ນວ່າ
ເຮົາກ່າວສິ່ງນີ້ ດັ່ງນີ້ ຍ່ອມບໍ່ມີແກ່ເຮົານັ້ນ
ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຢຶດໝັ້ນ
ເມື່ອໄຈ້ແຍກ ຈຶ່ງໄດ້ເຫັນຄວາມສະງົບພາຍໃນ

ຄຳວ່າ ເຮົາກ່າວສິ່ງນີ້ ໃນຄຳວ່າ ຯລຯ ເຮົາກ່າວສິ່ງນີ້ ດັ່ງນີ້ ຍ່ອມບໍ່ມີແກ່ເຮົານັ້ນ ອະທິບາຍວ່າ ເຮົາກ່າວສິ່ງນີ້ ຄື ເຮົາກ່າວສິ່ງນັ້ນ ກ່າວເທົ່ານີ້ ກ່າວພຽງເທົ່ານີ້ ກ່າວທິດຖິນີ້ວ່າ ໂລກທ່ຽງ ຯລຯ ຫຼື ວ່າຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າ ບໍ່ເກີດອີກກໍບໍ່ແມ່ນ

ຄຳວ່າ ຯລຯ ຍ່ອມບໍ່ມີແກ່ເຮົານັ້ນ ໄດ້ແກ່ ຍ່ອມບໍ່ມີແກ່ເຮົາ ຄື ຄຳກ່າວວ່າ ເຮົາກ່າວພຽງເທົ່ານີ້ ດັ່ງນີ້ ຍ່ອມບໍ່ມີແກ່ເຮົານັ້ນ ລວມຄວາມວ່າ ຯລຯ ວ່າເຮົາກ່າວສິ່ງນີ້ ດັ່ງນີ້ ຍ່ອມບໍ່ມີແກ່ເຮົານັ້ນ

ຄຳວ່າ ມາຄັນທິຍະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມາຄັນທິຍະ

## ວ່າດ້ວຍທິດຖິ ໖໘

ຄຳວ່າ ໃນທຳທັງຫຼາຍ ໃນຄຳວ່າ ການຕົກລົງໃຈໃນທຳທັງຫຼາຍແລ້ວຖືໝັ້ນ ໄດ້ແກ່ ໃນທິດຖິ ໖໘

ຄຳວ່າ ຕົກລົງໃຈ ຯລຯ ແລ້ວ ອະທິບາຍວ່າ ຕົກລົງໃຈແລ້ວ ຄື ພິຈາລະນາແລ້ວ ຕັດສິນແລ້ວ ຊີ້ຂາດແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ

ຈັບໝັ້ນ ຍຶດໝັ້ນ ຖືໝັ້ນ ລວບຖື ລວມຖື ລວບລວມຖື ຄື ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອວ່າ ຂໍ້ນີ້ຈິງ ແທ້ ແນ່ ແທ້ຈິງ ຕາມເປັນຈິງ ບໍ່ວິປະຣິດ ບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ພຣະຕະຖາຄົດພຣະອົງນັ້ນ ຄື ການຕົກລົງໃຈແລ້ວຖືໝັ້ນ ອັນພຣະຕະຖາຄົດ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ການຕົກລົງໃຈໃນທຳທັງຫຼາຍແລ້ວຍຶດໝັ້ນ

ຄຳວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ ອະທິບາຍວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທັງຫຼາຍ

ອີກໄນໜຶ່ງ ທິດຖິທັງຫຼາຍ ບຸກຄົນບໍ່ຄວນຖື ບໍ່ຄວນຍຶດໝັ້ນ ບໍ່ຄວນຖືໝັ້ນ ລວມຄວາມວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ ແນວນີ້ແດ່

ອີກໄນໜຶ່ງ ເຮົາເຫັນໂທດໃນທິດຖິທັງຫຼາຍວ່າ ທິດຖິນີ້ວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ເປັນທິດຖິຮົກທຶບ ເປັນທິດຖິກັນດານ ເປັນທິດຖິທີ່ເປັນຂ້າເສິກ ເປັນການດີ້ນຣົນດ້ວຍທິດຖິ ເປັນເຄື່ອງປະກອບຄືທິດຖິ (ທິດຖິສັງໂຍດ) ມີທຸກ ມີຄວາມລຳບາກ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບຣະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອ ຕັດສະຣູ້ ບໍ່ເປັນໄປເພື່ອນິບພານ ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທັງຫຼາຍ ອັນໜຶ່ງ ທິດຖິທັງຫຼາຍ ບຸກຄົນບໍ່ຄວນຖື ບໍ່ຄວນຍຶດໝັ້ນ ບໍ່ຄວນຖືໝັ້ນ ລວມຄວາມວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນແນວນີ້ແດ່

ອີກໄນໜຶ່ງ ເຮົາເຫັນໂທດໃນທິດຖິທັງຫຼາຍວ່າ ທິດຖິນີ້ວ່າ ໂລກບໍ່ທ່ຽງ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນຢ່າງດຽວກັນ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ເປັນທິດຖິຮົກທຶບ ເປັນທິດຖິກັນດານ ເປັນທິດຖິທີ່ເປັນຂ້າເສິກ ເປັນການດີ້ນຣົນດ້ວຍທິດຖິ ເປັນເຄື່ອງປະກອບ ຄື ທິດຖິມີທຸກ ມີຄວາມລຳບາກ ມີຄວາມຄັບແຄ້ນ ມີຄວາມຮ້ອນຮົນ ບໍ່ເປັນໄປເພື່ອ ຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບຣະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທັງຫຼາຍ ອັນໜຶ່ງ ທິດຖິທັງຫຼາຍ ບຸກຄົນບໍ່ຄວນຖື ບໍ່ຄວນຍຶດໝັ້ນ ບໍ່ຄວນຖືໝັ້ນ ລວມຄວາມວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ ແນວນີ້ແດ່

ອີກໄນໜຶ່ງ ເຮົາເຫັນໂທດໃນທິດຖິທັງຫຼາຍວ່າ ທິດຖິເຫຼົ່ານີ້ ທີ່ບຸກຄົນຍຶດຖືແນວນີ້ແລ້ວ ຍ່ອມມີຄະຕິແລະມີພົບໜ້າແນວນັ້ນ ໆ ຈຶ່ງບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທັງຫຼາຍ ອັນໜຶ່ງ ທິດຖິ

ທັງຫຼາຍ ບຸກຄົນບໍ່ຄວນຖື ບໍ່ຄວນຍຶດໝັ້ນ ບໍ່ຄວນຖືໝັ້ນ ລວມຄວາມວ່າ ເຮົາເຫັນໂທດໃນ ທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ ແນວນີ້ແດ່

ອີກໄນໜຶ່ງ ເຮົາເຫັນໂທດໃນທິດຖິທັງຫຼາຍວ່າ ທິດຖິເຫຼົ່ານີ້ ຍ່ອມເປັນໄປເພື່ອເກີດ ໃນນະຮົກ ເປັນໄປເພື່ອເກີດໃນກຳເນີດເດຍຣັດສານ ເປັນໄປເພື່ອເກີດໃນເພດວິໄສ ຈຶ່ງບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທັງຫຼາຍ ອັນໜຶ່ງ ທິດຖິທັງຫຼາຍ ບຸກຄົນບໍ່ຄວນຖື ບໍ່ຄວນຍຶດໝັ້ນ ບໍ່ຄວນຖືໝັ້ນ ລວມຄວາມວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ ແນວນີ້ແດ່

ອີກໄນໜຶ່ງ ເຮົາເຫັນໂທດໃນທິດຖິທັງຫຼາຍວ່າ ທິດຖິເຫຼົ່ານີ້ ບໍ່ທ່ຽງ ປັດໄຈປຸງແຕ່ງ ຂຶ້ນອາໄສກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ຈຶ່ງບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທັງຫຼາຍ ອັນໜຶ່ງ ທິດຖິທັງຫຼາຍ ບຸກຄົນບໍ່ຄວນຖື ບໍ່ຄວນຍຶດໝັ້ນ ບໍ່ຄວນຖືໝັ້ນ ລວມຄວາມວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ ແນວນີ້ແດ່

ຄຳວ່າ ເມື່ອໄຈ້ແຍກ ຈຶ່ງໄດ້ເຫັນຄວາມສະງົບພາຍໃນ ອະທິບາຍວ່າ ຄວາມສະງົບພາຍໃນ ຄື ຄວາມສະງົບ ຄວາມເຂົ້າໄປສະງົບ ຄວາມສະງົບເຢັນ ຄວາມດັບ ຄວາມສະງົບຣະງັບຣາຄະ ฯລฯ ໂທສະ ฯລฯໂມຫະ ฯລฯໂກທະ ฯລฯອຸປະນາຫະ ฯລฯ ມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖຳພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯ ຄວາມຮ້ອນຮົນທຸກສະຖານ ฯລฯ ຄວາມເດືອດຮ້ອນທຸກປະການ ฯລฯ ອະກຸສະລາພິສັງຂານທຸກປະເພດພາຍໃນ

ຄຳວ່າ ເມື່ອໄຈ້ແຍກ ໄດ້ແກ່ ເມື່ອໄຈ້ແຍກ ຄື ເລືອກສັນ ຊີ້ຂາດ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງວ່າ ສັງຂານທັງປວງບໍ່ທ່ຽງ ເມື່ອໄຈ້ແຍກ ຄື ເລືອກສັນ ຊີ້ຂາດ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງວ່າ ສັງຂານທັງປວງເປັນທຸກ ฯລฯ ທຳທັງປວງເປັນອະນັດຕາ ฯລฯ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດ ລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ຈຶ່ງໄດ້ເຫັນ ໄດ້ແກ່ ແນມເຫັນ ແທງຕະຫຼອດ ລວມຄວາມວ່າ ເມື່ອໄຈ້ແຍກ ຈຶ່ງໄດ້ເຫັນຄວາມສະງົບພາຍໃນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດຕອບວ່າ

ມາຄັນທິຍະການຕົກລົງໃຈໃນທຳທັງຫຼາຍແລ້ວຖືໝັ້ນວ່າ
ເຮົາກ່າວສິ່ງນີ້ ດັ່ງນີ້ ຍ່ອມບໍ່ມີແກ່ເຮົານັ້ນ
ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຍຶດໝັ້ນ
ເມື່ອໄຈ້ແຍກ ຈຶ່ງໄດ້ເຫັນຄວາມສະງົບພາຍໃນ

[໗໓] (ມາຄັນທິຍະພາມທູນຖາມດັ່ງນີ້)

ທິດຖິເຫຼົ່າໃດທີ່ຕົກລົງໃຈກຳນົດໄວ້ແລ້ວ
ມຸນີບໍ່ຍຶດໝັ້ນທິດຖິເຫຼົ່ານັ້ນ
ກ່າວເນື້ອຄວາມໃດວ່າ ຄວາມສະງົບພາຍໃນ
ເນື້ອຄວາມນັ້ນ ນັກປາດທັງຫຼາຍປະກາດໄວ້ແນວໃດນໍ

ຄຳວ່າ ທິດຖິເຫຼົ່າໃດທີ່ຕົກລົງໃຈກຳນົດໄວ້ແລ້ວ ໄດ້ແກ່ ທິດຖິ ໖໔ ພາມ ຮຽກວ່າ ຄວາມຕົກລົງໃຈ

ຄຳວ່າ ກຳນົດໄວ້ແລ້ວ ໄດ້ແກ່ ກຳນົດແລ້ວ ກຳນົດໄວ້ແລ້ວ ຄື ປຸງແຕ່ງໄວ້ແລ້ວ ຕັ້ງໄວ້ດີແລ້ວ ລວມຄວາມວ່າ ກຳນົດໄວ້ແລ້ວ

ອີກໄນໜຶ່ງ ທິດຖິທັງຫຼາຍທີ່ກຳນົດ ບໍ່ທ່ຽງ ປັດໄຈປຸງແຕ່ງຂຶ້ນ ອາໄສກັນ ເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກ ເປັນທຳ ມະດາ ມີຄວາມດັບໄປເປັນທຳມະດາ ມີຄວາມຜັນປ່ຽນໄປເປັນທຳມະດາ ລວມຄວາມວ່າ ທິດຖິເຫຼົ່າໃດທີ່ຕົກລົງໃຈກຳນົດໄວ້ແລ້ວ

ຄຳວ່າ ດັ່ງນີ້ ໃນຄຳວ່າ ມາຄັນທິຍະພາມທູນຖາມດັ່ງນີ້ ເປັນບົດສົນທິ ຯລຯ ຄຳວ່າ ດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ມາຄັນທິຍະ ເປັນຊື່ຂອງພາມນັ້ນ ຄືເປັນການກ່າວເຖິງ ການຂະໜານນາມ ການບັນຍັດ ເປັນຊື່ທີ່ຮຽກກັນ ລວມຄວາມວ່າ ມາຄັນທິຍະພາມທູນຖາມ ດັ່ງນີ້

ຄຳວ່າ ເຫຼົ່ານັ້ນແລ ໃນຄຳວ່າ ມຸນີບໍ່ຍຶດໝັ້ນທິດຖິເຫຼົ່ານັ້ນ ກ່າວເນື້ອຄວາມໃດ ວ່າຄວາມສະງົບພາຍໃນ ໄດ້ແກ່ ທິດຖິ ໖໔

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ບໍ່ຍຶດໝັ້ນ ອະທິບາຍວ່າ ທ່ານກ່າວວ່າ ເຮົາເຫັນໂທດໃນທິດຖິທັງຫຼາຍ ຈຶ່ງບໍ່ຖືຄື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທັງຫຼາຍ ແລະກ່າວວ່າ ມີຄວາມສະງົບພາຍໃນ

ຄຳວ່າ ເນື້ອຄວາມໃດ ໄດ້ແກ່ ເນື້ອຄວາມທີ່ດີຢ່ຽມໃດ ລວມຄວາມວ່າ ມຸນີບໍ່ຍຶດໝັ້ນທິດຖິເຫຼົ່ານັ້ນແລ ກ່າວເນື້ອຄວາມໃດວ່າ ຄວາມສະງົບພາຍໃນ

ຄຳວ່າ ແນວໃດນໍ ໃນຄຳວ່າ ເນື້ອຄວາມນັ້ນ ນັກປາດທັງຫຼາຍປະກາດໄວ້ແນວໃດນໍ ເປັນຄຳຖາມດ້ວຍຄວາມສົງໄສ ເປັນຄຳຖາມດ້ວຍຄວາມຂ້ອງໃຈ ເປັນຄຳຖາມ ໔ ແງ່ ເປັນຄຳຖາມມີແງ່ມຸມຫຼາຍຫຼາກວ່າ ແນວນີ້ບໍນໍ ບໍ່ແມ່ນບໍນໍ ເປັນອັນໃດນໍ? ເປັນແນວໃດ?ນໍ ລວມຄວາມວ່າ ແນວໃດນໍ?

ຄຳວ່າ ນັກປາດທັງຫຼາຍ ໄດ້ແກ່ ນັກປາດທັງຫຼາຍ ຄື ບັນດິດ ຜູ້ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ປະກາດໄວ້ ໄດ້ແກ່ ປະກາດໄວ້ ຄື ປະກາດໃຫ້ຮູ້ ບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດໄວ້ແລ້ວ ລວມຄວາມວ່າ ເນື້ອຄວາມນັ້ນ ນັກປາດທັງຫຼາຍປະກາດໄວ້ແນວໃດນໍ ດ້ວຍເຫດນັ້ນ ພາມນັ້ນຈຶ່ງກ່າວວ່າ

ທິດຖິເຫຼົ່າໃດທີ່ຕົກລົງໃຈກຳນົດໄວ້ແລ້ວ
ມຸນີບໍ່ຢຶດໝັ້ນທິດຖິເຫຼົ່ານັ້ນ
ກ່າວເນື້ອຄວາມໃດວ່າ ຄວາມສະງົບພາຍໃນ
ເນື້ອຄວາມນັ້ນ ນັກປາດທັງຫຼາຍປະກາດໄວ້ແນວໃດນໍ

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມາຄັນທິຍະ)

ນັກປາດບໍ່ກ່າວຄວາມບົດຈິດຍ້ອນທິດຖິ
ບໍ່ກ່າວຄວາມບົດຈິດຍ້ອນສຸຕະ
ບໍ່ກ່າວຄວາມບົດຈິດຍ້ອນຍານ
ບໍ່ກ່າວຄວາມບົດຈິດຍ້ອນສີນແລະຂໍ້ວັດ
ບຸກຄົນຍ່ອມເຖິງຄວາມສະງົບພາຍໃນ
ຍ້ອນຄວາມບໍ່ມີທິດຖິ ຍ້ອນຄວາມບໍ່ມີສຸຕະ
ຍ້ອນຄວາມບໍ່ມີຍານ ຍ້ອນຄວາມບໍ່ມີສີນ
ຍ້ອນຄວາມບໍ່ມີຂໍ້ວັດນັ້ນກໍບໍ່ຖືກຕ້ອງ
ນັກປາດສະລັດຖິ້ມທຳເຫຼົ່ານີ້ໄດ້ແລ້ວ
ບໍ່ຢຶດໝັ້ນ ເປັນຜູ້ສະງົບ ບໍ່ອາໄສແລ້ວ ບໍ່ເພິ່ງຫວັງພົບໃໝ່

ຄຳວ່າ ນັກປາດບໍ່ກ່າວຄວາມບົດຈິດຍ້ອນທິດຖິ ບໍ່ກ່າວຄວາມບົດຈິດຍ້ອນສຸຕະ ບໍ່ກ່າວຄວາມບົດຈິດຍ້ອນຍານ ອະທິບາຍວ່າ ນັກປາດບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບົດຈິດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນທິດຖິ ຯລຯ ຍ້ອນສຸຕະ ຯລຯ ຍ້ອນທິດຖິແລະສຸຕະ ນັກປາດບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບົດຈິດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນຍານ ລວມຄວາມວ່າ ນັກປາດບໍ່ກ່າວຄວາມບົດຈິດຍ້ອນທິດຖິ ບໍ່ກ່າວຄວາມບົດຈິດຍ້ອນສຸຕະ ບໍ່ກ່າວຄວາມບົດຈິດຍ້ອນຍານ

ຄຳວ່າ ມາຄັນທິຍະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ ໆລໆ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມາຄັນທິຍະ

ຄຳວ່າ ນັກປາດບໍ່ກ່າວຄວາມບໍລິສຸດດ້ວຍສີນແລະຂໍ້ວັດ ອະທິບາຍວ່າ ນັກປາດບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສີນ ໆລໆ ຍ້ອນຂໍ້ວັດ ນັກປາດບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສີນຂໍ້ວັດ ລວມຄວາມວ່າ ນັກປາດບໍ່ກ່າວຄວາມບໍລິສຸດຍ້ອນສີນແລະຂໍ້ວັດ

ຄຳວ່າ ບຸກຄົນຍ່ອມເຖິງຄວາມສະງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ ຍ້ອນຄວາມບໍ່ມີສີນ ຍ້ອນຄວາມບໍ່ມີຂໍ້ວັດນັ້ນກໍບໍ່ຖືກຕ້ອງ ອະທິບາຍວ່າ ທິດຖິ ປະສົງເອົາສຳມາທິດຖິມີວັດຖຸ ໑໐ ຄື

໑. ທານທີ່ໃຫ້ແລ້ວມີຜົນ
໒. ການບວງສວງມີຜົນ
໓. ຍັນທີ່ບູຊາແລ້ວມີຜົນ
໔. ຜົນວິບາກຂອງກຳທີ່ເຮັດດີເຮັດຊົ່ວມີຢູ່
໕. ໂລກນີ້ມີ
໖. ໂລກໜ້າມີ
໗. ມານດາມີຄຸນ
໘. ບິດາມີຄຸນ
໙. ສັດທີ່ເປັນໂອປະປາຕິກະມີຢູ່
໑໐. ສະມະນະພາມຜູ້ປະຕິບັດດີ ປະຕິບັດຖືກ ຮູ້ແຈ້ງໂລກນີ້ແລະໂລກໜ້າດ້ວຍຕົນເອງແລ້ວສອນໃຫ້ຜູ້ອື່ນຮູ້ແຈ້ງມີຢູ່ໃນໂລກ

ສຸຕະ ປະສົງເອົາສຽງຈາກຜູ້ອື່ນ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ

ຍານ ປະສົງເອົາກຳມັດສະກະຕາຍານ ສັດຈານຸໂລມິກະຍານ ອະພິນຍາຍານ ສະມາປັດຕິຍານ

ສີນ ປະສົງເອົາປາຕິໂມກຂະສັງວອນ

ຂໍ້ວັດ ປະສົງເອົາທຸດົງ ໘ ຂໍ້ ຄື

໑. ອາຣັນຍິກັງຄະທຸດົງ
໒. ປັງສຸກູລິກັງຄະທຸດົງ
໓. ປິນດະປາຕິກັງຄະທຸດົງ
໔. ເຕຈີວະຣິກັງຄະທຸດົງ
໕. ສະປະທານະຈາຣິກັງຄະທຸດົງ
໖. ຂະລຸປັດສາພັດຕິກັງຄະທຸດົງ
໗. ເນສັດຊິກັງຄະທຸດົງ
໘. ຍະຖາສັນຖະຕິກັງຄະທຸດົງ

ຄຳວ່າ ບຸກຄົນຍ່ອມເຖິງຄວາມສະຫງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ ຍ້ອນຄວາມບໍ່ມີສີນ ຍ້ອນຄວາມບໍ່ມີຂໍ້ວັດນັ້ນກໍບໍ່ຖືກຕ້ອງ ອະທິບາຍວ່າ ບຸກຄົນເປັນຜູ້ບັນລຸເຖິງຄວາມສະຫງົບພາຍໃນ ພຽງຍ້ອນສຳມາທິດຖິ ກໍບໍ່ຖືກຕ້ອງ ພຽງຍ້ອນການໄດ້ຟັງກໍບໍ່ຖືກຕ້ອງ ພຽງຍ້ອນຍານກໍບໍ່ຖືກຕ້ອງ ພຽງຍ້ອນສີນກໍບໍ່ຖືກຕ້ອງ ພຽງຍ້ອນຂໍ້ວັດກໍບໍ່ຖືກຕ້ອງ ຄື ບັນລຸເຖິງຄວາມສະຫງົບພາຍໃນ ໂດຍເວັ້ນຈາກທຳເຫຼົ່ານີ້ກໍບໍ່ຖືກຕ້ອງ ຍ້ອນທຳເຫຼົ່ານີ້ ເປັນເຄື່ອງປະກອບເພື່ອບັນລຸ ເພື່ອເຖິງ ເພື່ອຖືກຕ້ອງ ເພື່ອເຮັດໃຫ້ແຈ້ງຄວາມສະຫງົບພາຍໃນ ລວມຄວາມວ່າ ບຸກຄົນຍ່ອມເຖິງຄວາມສະຫງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ ຍ້ອນຄວາມ ບໍ່ມີສີນ ຍ້ອນຄວາມບໍ່ມີຂໍ້ວັດນັ້ນກໍບໍ່ຖືກຕ້ອງ

ຄຳວ່າ ເຫຼົ່ານີ້ ໃນຄຳວ່າ ສະລັດຖິ້ມທຳເຫຼົ່ານີ້ໄດ້ແລ້ວ ບໍ່ຢຶດໝັ້ນ ອະທິບາຍວ່າ ບຸກຄົນຫວັງການລະທຳຝ່າຍດຳໂດຍກຳຈັດໄດ້ເດັດຂາດ ຫວັງການບໍ່ກໍ່ຕັນຫາໃນກຸສົນທຳທັງຫຼາຍໃນໄຕຣທາດ ບຸກຄົນລະທຳຝ່າຍດຳ ໂດຍການລະໄດ້ຢ່າງເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ແລະບໍ່ກໍ່ຕັນຫາໃນກຸສົນທຳທັງຫຼາຍໃນໄຕຣທາດຍ້ອນເຫດໃດ ນັກປາດຍ່ອມບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນຍ້ອນເຫດເທົ່ານີ້

ອີກໄນໜຶ່ງ ທຳຝ່າຍດຳ ນັກປາດບໍ່ຄວນຖື ບໍ່ຄວນຢຶດໝັ້ນ ບໍ່ຄວນຖືໝັ້ນ

ລວມຄວາມວ່າ ສະລັດຖິ້ມທຳເຫຼົ່ານີ້ໄດ້ແລ້ວ ບໍ່ຢຶດໝັ້ນ ແນວນີ້ແດ່

ບຸກຄົນລະຕັນຫາ ທິດຖິ ແລະມານະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນ ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນເຫດໃດ ນັກປາດຍ່ອມບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ຍ້ອນເຫດເທົ່ານີ້ ລວມຄວາມວ່າ ສະລັດຖິ້ມທຳເຫຼົ່ານີ້ໄດ້ແລ້ວ ບໍ່ຢຶດໝັ້ນ ແນວນີ້ແດ່

ບຸກຄົນລະປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະອາເນນຊາພິສັງຂານໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນເຫດໃດ ນັກປາດຍ່ອມບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ຍ້ອນເຫດເທົ່ານີ້ ລວມຄວາມວ່າ ສະລັດຖິ້ມທຳເຫຼົ່ານີ້ໄດ້ແລ້ວ ບໍ່ຢຶດໝັ້ນ ແນວນີ້ແດ່

ຄຳວ່າ ເປັນຜູ້ສະຫງົບ ໃນຄຳວ່າ ນັກປາດ ฯລฯ ເປັນຜູ້ສະຫງົບ ບໍ່ອາໄສແລ້ວ ບໍ່ເພິ່ງຫວັງພົບໃໝ່ ອະທິບາຍວ່າ ຊື່ວ່າເປັນຜູ້ສະຫງົບ ຄື ເຂົ້າໄປສະຫງົບແລ້ວ ສະຫງົບເຢັນແລ້ວ ດັບໄດ້ແລ້ວ ສະຫງົບຣະງັບໄດ້ແລ້ວ ຍ້ອນສະຫງົບ ຣະງັບ ສະຫງົບເຢັນ ເຜົາ ດັບ ປາສະຈາກ ສະຫງົບຣະງັບຣາຄະ ฯລฯ ໂທສະ ฯລฯ ໂມຫະ ฯລฯ ໂກທະ ฯລฯ ອຸປະນາຫະ ฯລฯ ມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖິຍຍະ ฯລฯ ຖຳພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ

ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ອະກຸສະລາພິສັງຂານທຸກປະເພດ ລວມຄວາມວ່າ ເປັນຜູ້ສະງົບ

ຄຳວ່າ ບໍ່ອາໄສແລ້ວ ໄດ້ແກ່ ຄວາມອາໄສ ໒ ຢ່າງ ຄື (໑) ຄວາມອາໄສດ້ວຍ ອຳນາດຕັນຫາ (໒) ຄວາມອາໄສດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດທິດຖິ

ນັກປາດລະການອາໄສດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການອາໄສດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ອາໄສ ຄື ບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ຕາ ຯລຯ ຫູ ຯລຯ ດັງ ຯລຯ ລີ້ນ ຯລຯ ກາຍ ຯລຯ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ກາມທາດ ຯລຯ ຮູບທາດ ຯລຯ ອະຮູບທາດ ຯລຯ ກາມພົບ ຯລຯ ຮູບພົບ ຯລຯ ອະຮູບພົບ ຯລຯ ສັນຍາພົບ ຯລຯ ອະສັນຍາພົບ ຯລຯ ເນວະສັນຍານາສັນຍາພົບ ຯລຯ ເອກະໂວກາຣະພົບ ຯລຯ ຈະຕຸໂວກາຣະພົບ ຯລຯ ປັນຈະໂວກາຣະພົບ ຯລຯ ອະດີດ ຯລຯ ອະນາຄົດ ຯລຯ ປັດຈຸບັນ ບໍ່ອາໄສ ຄື ບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະ ທຳມາຣົມທີ່ເພິ່ງຮູ້ແຈ້ງ ລວມຄວາມວ່າ ເປັນຜູ້ສະງົບ ບໍ່ອາໄສແລ້ວ

ຄຳວ່າ ບໍ່ເພິ່ງຫວັງພົບ ໄດ້ແກ່ ບໍ່ເພິ່ງຫວັງ ຄື ບໍ່ເພິ່ງມຸ້ງຫວັງ ບໍ່ເພິ່ງຄາດຫວັງ ກາມພົບ ຮູບພົບ ອະຮູບພົບ ລວມຄວາມວ່າ ນັກປາດ ຯລຯ ເປັນຜູ້ສະງົບ ບໍ່ອາໄສແລ້ວ ບໍ່ເພິ່ງຫວັງພົບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ ມາຄັນທິຍະ

ນັກປາດບໍ່ກ່າວຄວາມມົດຈົດຍ້ອນທິດຖິ
ບໍ່ກ່າວຄວາມມົດຈົດຍ້ອນສຸຕະ
ບໍ່ກ່າວຄວາມມົດຈົດຍ້ອນຍານ
ບໍ່ກ່າວຄວາມມົດຈົດຍ້ອນສີນແລະຂໍ້ວັດ
ບຸກຄົນຍ່ອມເຖິງຄວາມສະງົບພາຍໃນ
ຍ້ອນຄວາມບໍ່ມີທິດຖິ ຍ້ອນຄວາມບໍ່ມີສຸຕະ
ຍ້ອນຄວາມບໍ່ມີຍານ ຍ້ອນຄວາມບໍ່ມີສີນ
ຍ້ອນຄວາມບໍ່ມີຂໍ້ວັດນັ້ນກໍບໍ່ຖືກຕ້ອງ
ນັກປາດສະລັດຖິ້ມທຳເຫຼົ່ານີ້ໄດ້ແລ້ວ
ບໍ່ຢຶດໝັ້ນ ເປັນຜູ້ສະງົບ ບໍ່ອາໄສແລ້ວ ບໍ່ເພິ່ງຫວັງພົບ

[໗໕] (ມາຄັນທິຍະພາມຂາບທູນ ດັ່ງນີ້)

ຫາກນັກປາດບໍ່ກ່າວຄວາມບໍລິສຸດຍ້ອນທິດຖິ
ບໍ່ກ່າວຄວາມບໍລິສຸດຍ້ອນສຸຕະ
ບໍ່ກ່າວຄວາມບໍລິສຸດຍ້ອນຍານ
ບໍ່ກ່າວຄວາມບໍລິສຸດຍ້ອນສິນແລະຂໍ້ວັດ
ບຸກຄົນຍ່ອມເຖິງຄວາມສະຫງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ
ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ
ຍ້ອນຄວາມບໍ່ມີສິນ ຍ້ອນຄວາມບໍ່ມີຂໍ້ວັດນັ້ນກໍບໍ່ຖືກຕ້ອງ
ຂ້າພະເຈົ້າຈຶ່ງເຂົ້າໃຈທຳຂອງທ່ານວ່າ ເປັນເລື່ອງງົມງວາຍແນ່ນອນ
ຍ້ອນສະມະນະພາມບາງພວກຖືຄວາມບໍລິສຸດໄດ້ຍ້ອນທິດຖິ

ຄຳວ່າ ຫາກນັກປາດບໍ່ກ່າວຄວາມບໍລິສຸດຍ້ອນທິດຖິ ບໍ່ກ່າວຄວາມບໍລິສຸດຍ້ອນສຸຕະ ບໍ່ກ່າວຄວາມບໍລິສຸດຍ້ອນຍານ ອະທິບາຍວ່າ ນັກປາດ ບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນທິດຖິ ຯລຯ ຍ້ອນສຸຕະ ຯລຯ ຍ້ອນທິດຖິແລະສຸຕະ ຯລຯ ນັກປາດບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນຍານ ລວມຄວາມວ່າ ຫາກນັກປາດບໍ່ກ່າວຄວາມບໍລິສຸດຍ້ອນທິດຖິ ບໍ່ກ່າວຄວາມບໍລິສຸດຍ້ອນສຸຕະ ບໍ່ກ່າວຄວາມບໍລິສຸດຍ້ອນຍານ

ຄຳວ່າ ດັ່ງນີ້ ໃນຄຳວ່າ ມາຄັນທິຍະພາມຂາບທູນ ດັ່ງນີ້ ເປັນບົດສົນທິ ຯລຯ ຄຳວ່າ ດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ມາຄັນທິຍະ ເປັນຊື່ຂອງພາມນັ້ນ ຯລຯ ລວມຄວາມວ່າ ມາຄັນທິຍະພາມ ຂາບທູນ ດັ່ງນີ້

ຄຳວ່າ ບໍ່ກ່າວຄວາມບໍລິສຸດຍ້ອນສິນແລະຂໍ້ວັດ ອະທິບາຍວ່າ ບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສິນ ຯລຯ ຍ້ອນຂໍ້ວັດ ຯລຯ ບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສິນແລະຂໍ້ວັດ ລວມຄວາມວ່າ ບໍ່ກ່າວຄວາມບໍລິສຸດຍ້ອນສິນແລະຂໍ້ວັດ

ຄຳວ່າ ບຸກຄົນຍ່ອມເຖິງຄວາມສະຫງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ ຍ້ອນຄວາມບໍ່ມີສິນ ຍ້ອນຄວາມບໍ່ມີ ຂໍ້ວັດນັ້ນກໍບໍ່ຖືກຕ້ອງ ອະທິບາຍວ່າ ທ່ານກ່າວແນວນີ້ວ່າ ທິດຖິກໍເພິ່ງປາຖະໜາ ຯລຯ ການຟັງ ກໍເພິ່ງປາຖະໜາ ຯລຯ ຍານກໍເພິ່ງປາຖະໜາ ຯລຯ ສິນກໍເພິ່ງປາຖະໜາ ຯລຯ ທ່ານກ່າວແນວນີ້ວ່າ ຂໍ້ວັດກໍເພິ່ງ

ປາຖະໜາ ທ່ານບໍ່ສາມາດຍອມຮັບໂດຍສ່ວນດຽວໄດ້ ທັງບໍ່ສາມາດປະຕິເສດໂດຍສ່ວນດຽວໄດ້ ລວມຄວາມວ່າ ບຸກຄົນຍ່ອມເຖິງຄວາມສະງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ ຍ້ອນຄວາມບໍ່ມີສີນ ຍ້ອນຄວາມບໍ່ມີ ຂໍ້ວັດນັ້ນ ກໍບໍ່ຖືກຕ້ອງ

ຄຳວ່າ ຂ້າພະເຈົ້າຈຶ່ງເຂົ້າໃຈທຳຂອງທ່ານວ່າ ເປັນເລື້ອງງົມງວາຍແນ່ນອນ ອະທິບາຍວ່າ ຂ້າພະເຈົ້າຈຶ່ງເຂົ້າໃຈແບບນີ້ ຄື ຮູ້ ຮູ້ທົ່ວ ຮູ້ແຈ່ມແຈ້ງ ຮູ້ສະເພາະ ແທງຕະຫຼອດແບບນີ້ວ່າ ທຳຂອງທ່ານນີ້ ເປັນທຳງົມງວາຍ ຄື ເປັນທຳຂອງຄົນຈ້າ ທຳຂອງຄົນຫຼົງ ທຳຂອງຄົນບໍ່ຮູ້ ທຳຂອງຄົນມີລັດທິທີ່ຫຼົບລ່ຽງບໍ່ແນ່ນອນ ລວມຄວາມວ່າ ຂ້າພະເຈົ້າຈຶ່ງເຂົ້າໃຈທຳຂອງທ່ານວ່າ ເປັນເລື້ອງງົມງວາຍແນ່ນອນ

ຄຳວ່າ ຍ້ອນສະມະນະພາມບາງພວກເຖິງຄວາມບໍລິສຸດໄດ້ຍ້ອນທິດຖິ ອະທິບາຍວ່າ ສະມະນະພາມບາງພວກ ເຖິງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນທິດຖິວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ສະມະນະພາມບາງພວກ ເຖິງຄວາມບໍລິສຸດ ຄື ຄວາມສະອາດ

ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນທິດຖິວ່າ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນ ຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ຍ້ອນສະມະນະພາມບາງພວກເຖິງຄວາມບໍລິສຸດໄດ້ຍ້ອນທິດຖິ ດ້ວຍເຫດນັ້ນ ມາຄັນທິຍະພາມຈຶ່ງຂາບທູນດັ່ງນີ້

ຫາກນັກປາດບໍ່ກ່າວຄວາມບໍລິສຸດຍ້ອນທິດຖິ
ບໍ່ກ່າວຄວາມບໍລິສຸດຍ້ອນສຸຕະ
ບໍ່ກ່າວຄວາມບໍລິສຸດຍ້ອນຍານ
ບໍ່ກ່າວຄວາມບໍລິສຸດຍ້ອນສີນແລະຂໍ້ວັດ
ບຸກຄົນຍ່ອມເຖິງຄວາມສະງົບພາຍໃນ ຍ້ອນຄວາມບໍ່ມີທິດຖິ
ຍ້ອນຄວາມບໍ່ມີສຸຕະ ຍ້ອນຄວາມບໍ່ມີຍານ
ຍ້ອນຄວາມບໍ່ມີສີນ ຍ້ອນຄວາມບໍ່ມີຂໍ້ວັດນັ້ນກໍບໍ່ຖືກຕ້ອງ
ຂ້າພະເຈົ້າຈຶ່ງເຂົ້າໃຈທຳຂອງທ່ານວ່າ ເປັນເລື້ອງງົມງວາຍແນ່ນອນ
ຍ້ອນສະມະນະພາມບາງພວກເຖິງຄວາມບໍລິສຸດໄດ້ຍ້ອນທິດຖິ

[໗໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ ມາຄັນທິຍະ)

ຍ້ອນອາໄສທິດຖິທັງຫຼາຍ ທ່ານຈຶ່ງຖາມເນືອງ ໆ
ໄດ້ມາເຖິງຄວາມລຸ້ມຫຼົງໃນທິດຖິທັງຫຼາຍ ທີ່ທ່ານຖືໝັ້ນໄວ້ແລ້ວ
ແລະທ່ານກໍບໍ່ໄດ້ເຫັນສັນຍາແມ່ນໜ້ອຍໜຶ່ງຈາກທຳນີ້
ຍ້ອນເຫດນັ້ນ ທ່ານຈຶ່ງປະສົບແຕ່ຄວາມງົມງວາຍ

ຄໍາວ່າ ຍ້ອນອາໄສທິດຖິທັງຫຼາຍ ທ່ານຈຶ່ງຖາມເນືອງ ໆ ອະທິບາຍວ່າ ມາຄັນທິຍະ ພາມອາໄສທິດຖິຖາມເຖິງທິດຖິ ອາໄສຄວາມກ່ຽວຂ້ອງຖາມເຖິງຄວາມກ່ຽວຂ້ອງ ອາໄສຄວາມຜູກພັນຖາມເຖິງຄວາມຜູກພັນ ອາໄສຄວາມກັງວົນຖາມເຖິງຄວາມກັງວົນ

ຄໍາວ່າ ຈຶ່ງຖາມເນືອງ ໆ ໄດ້ແກ່ ຈຶ່ງຖາມຢູ່ເລື້ອຍ ໆ ລວມຄວາມວ່າ ຍ້ອນອາໄສ ທິດຖິ ທັງຫຼາຍທ່ານຈຶ່ງຖາມເນືອງ ໆ

ຄໍາວ່າ ມາຄັນທິຍະ ເປັນຄໍາທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄໍາກ່າວໂດຍຄວາມເຄົາຣົບ ຯລຯ ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ມາຄັນທິຍະ

ຄໍາວ່າ ໄດ້ມາເຖິງຄວາມລຸ້ມຫຼົງໃນທິດຖິທັງຫຼາຍ ທີ່ທ່ານຖືໝັ້ນໄວ້ແລ້ວ ອະທິບາຍວ່າ ທິດຖິໃດ ທ່ານຖື ຄື ຍຶດໝັ້ນ ຖືໝັ້ນ ຕິດໃຈ ນ້ອມໃຈເຊື່ອແລ້ວ ທ່ານຫຼົງ ຄື ລຸ້ມຫຼົງ ຫຼົງງົມງວາຍ ເຖິງຄວາມຫຼົງ ເຖິງຄວາມລຸ້ມຫຼົງ ເຖິງຄວາມຫຼົງງົມງວາຍ ແລ່ນໄປສູ່ຄວາມ ມືດມົນແລ້ວ ໃນທິດຖິນັ້ນ ລວມຄວາມວ່າ ໄດ້ມາເຖິງຄວາມລຸ້ມຫຼົງໃນທິດຖິທັງຫຼາຍ ທີ່ທ່ານຖືໝັ້ນໄວ້ແລ້ວ

ຄໍາວ່າ ແລະທ່ານກໍບໍ່ໄດ້ເຫັນສັນຍາແມ່ນໜ້ອຍໜຶ່ງຈາກທໍານີ້ ອະທິບາຍວ່າ ທ່ານ ບໍ່ໄດ້ພົບສັນຍາອັນສົມຄວນ ສັນຍາທີ່ເຖິງແລ້ວ ສັນຍາໃນລັກສະນະ ສັນຍາໃນເຫດ ຫຼື ສັນຍາໃນຖານະ ຈາກທໍານີ້ ຄື ຈາກຄວາມສະງົບພາຍໃນ ຈາກຂໍ້ປະຕິບັດ ຫຼື ຈາກ ທໍາມະເທດສະໜາເລີຍ ທ່ານຈັກໄດ້ຍານຈາກບ່ອນໃດນໍ ລວມຄວາມວ່າ ແລະທ່ານກໍບໍ່ໄດ້ເຫັນສັນຍາແມ່ນ ໜ້ອຍໜຶ່ງຈາກທໍານີ້ ແນວນີ້ແດ່

ອີກໄນໜຶ່ງ ທ່ານບໍ່ໄດ້ພົບປັນຈະຂັນເຊິ່ງບໍ່ທ່ຽງ ຫຼື ຍານເຊິ່ງອະນຸໂລມ ອະນິດຈະສັນຍາປັນຈະຂັນເຊິ່ງເປັນທຸກ ຫຼື ຍານເຊິ່ງອະນຸໂລມທຸກຂະສັນຍາ ທໍາເຊິ່ງເປັນອະນັດຕາ ຫຼື ຍານເຊິ່ງອະນຸໂລມອະນັດຕະສັນຍາ ທໍາພຽງແຕ່ຄວາມເກີດຂຶ້ນແຫ່ງສັນຍາ ຫຼື ທໍາເປັນນິມິດແຫ່ງສັນຍາເລີຍ ທ່ານຈັກໄດ້ຍານຈາກບ່ອນໃດ ລວມຄວາມວ່າ ແລະທ່ານບໍ່ໄດ້ເຫັນສັນຍາແມ່ນໜ້ອຍໜຶ່ງຈາກທໍານີ້ ແນວນີ້ແດ່

ຄໍາວ່າ ຍ້ອນເຫດນັ້ນ ໃນຄໍາວ່າ ຍ້ອນເຫດນັ້ນ ທ່ານຈຶ່ງປະສົບແຕ່ຄວາມງົມງວາຍ ອະທິບາຍວ່າ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ທ່ານຈຶ່ງປະສົບ ຄື ເຫັນ ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາ ເບິ່ງແຕ່ທໍາຄືຄວາມງົມງວາຍ ທໍາຂອງຄົນຈ້ໍາ ທໍາຂອງຄົນຫຼົງ ທໍາຂອງຄົນບໍ່ຮູ້ ທໍາຂອງຄົນທີ່ມີລັດທິຫຼົບລ່ຽງບໍ່ແນ່ນອນ ລວມຄວາມວ່າ ຍ້ອນເຫດນັ້ນ ທ່ານຈຶ່ງປະສົບແຕ່ຄວາມງົມງວາຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ມາຄັນທິຍະ

ຍ້ອນອາໄສທິດຖິທັງຫຼາຍ ທ່ານຈຶ່ງຖາມເນືອງ ໆ
ໄດ້ມາເຖິງຄວາມລຸ້ມຫຼົງໃນທິດຖິທັງຫຼາຍ ທີ່ທ່ານຖືໝັ້ນໄວ້ແລ້ວ
ແລະທ່ານກໍບໍ່ໄດ້ເຫັນສັນຍາແມ່ນໜ້ອຍໜຶ່ງຈາກທຳນີ້
ຍ້ອນເຫດນັ້ນ ທ່ານຈຶ່ງປະສົບແຕ່ຄວາມງົມງວາຍ

[໗໗] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ຜູ້ໃດສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ ຫຼື ດ້ອຍກວ່າເຂົາ
ຜູ້ນັ້ນເພິ່ງຕ້ອງວິວາດກັນດ້ວຍຄວາມຖືຕົວນັ້ນ
ບຸກຄົນບໍ່ຫວັ່ນໄຫວໃນຍ້ອນຄວາມຖືຕົວ ໓ ຢ່າງ
ຄວາມສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ
(ຫຼືດ້ອຍກວ່າເຂົາ) ຈຶ່ງບໍ່ມີແກ່ບຸກຄົນນັ້ນ

ຄຳວ່າ ຜູ້ໃດສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ ຫຼື ດ້ອຍກວ່າເຂົາ ຜູ້ນັ້ນ ເພິ່ງຕ້ອງວິວາດກັນດ້ວຍຄວາມຖືຕົວນັ້ນ ອະທິບາຍວ່າ ຜູ້ໃດສຳຄັນວ່າ ເຮົາສະເໝີເຂົາ ເຮົາເລີດກວ່າເຂົາ ຫຼື ເຮົາດ້ອຍກວ່າເຂົາ ຜູ້ນັ້ນ ເພິ່ງຕ້ອງກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການຍາດແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍ ດ້ວຍຄວາມຖືຕົວນັ້ນ ຄື ດ້ວຍທິດຖິນັ້ນ ຫຼື ກັບບຸກຄົນນັ້ນວ່າ ທ່ານບໍ່ຮູ້ທຳວິໄນນີ້ ເຮົາຮູ້ທຳວິໄນນີ້ ທ່ານຈັກຮູ້ທຳວິໄນ ນີ້ໄດ້ແນວໃດ ທ່ານປະຕິບັດຜິດ ເຮົາປະຕິບັດຖືກຕ້ອງ ຄຳຂອງເຮົາມີປະໂຫຍດ ຄຳຂອງທ່ານ ບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານກັບເວົ້າພາຍຫຼັງ ຄຳທີ່ຄວນເວົ້າພາຍຫຼັງທ່ານກັບເວົ້າກ່ອນ ຄຳທີ່ທ່ານໃຊ້ສະເໝີກັບຕິດຂັດ ວາທະຂອງທ່ານເຮົາຫັກລ້າງໄດ້ແລ້ວ ເຮົາປາບປາມທ່ານໄດ້ແລ້ວ ທ່ານຈົ່ງທ່ຽວໄປເພື່ອປົດວາທະ ຫຼື ຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ ລວມຄວາມວ່າ ຜູ້ໃດສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ ຫຼື ດ້ອຍກວ່າເຂົາ ຜູ້ນັ້ນເພິ່ງຕ້ອງວິວາດກັນດ້ວຍຄວາມຖືຕົວນັ້ນ

ຄຳວ່າ ບຸກຄົນບໍ່ຫວັ່ນໄຫວຍ້ອນຄວາມຖືຕົວ ໓ ຢ່າງ ຄວາມສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ (ຫຼືດ້ອຍກວ່າເຂົາ) ຈຶ່ງບໍ່ມີແກ່ບຸກຄົນນັ້ນ ອະທິບາຍວ່າ ຄວາມຖືຕົວ ໓ ຢ່າງເຫຼົ່ານີ້ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຍ່ອມບໍ່ຫວັ່ນໄຫວ ຄື ບໍ່ເອນອຽງ ໃນຄວາມຖືຕົວ ໓ ຢ່າງເຫຼົ່ານັ້ນ ຄວາມສຳຄັນວ່າ ເຮົາສະເໝີເຂົາ ເຮົາເລີດກວ່າເຂົາ ຫຼື ເຮົາດ້ອຍກວ່າເຂົາ ຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຫວັ່ນໄຫວ

ຄຳວ່າ ບໍ່ມີແກ່ບຸກຄົນນັ້ນ ໄດ້ແກ່ ບໍ່ມີແກ່ເຮົາ ລວມຄວາມວ່າ ບຸກຄົນບໍ່ຫວັ່ນໄຫວຍ້ອນຄວາມຖືຕົວ ໓ ຢ່າງ ຄວາມສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ ຫຼື ດ້ອຍ ກວ່າເຂົາ ຈຶ່ງບໍ່ມີແກ່ບຸກຄົນນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຜູ້ໃດສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ ຫຼືດ້ອຍກວ່າເຂົາ
ຜູ້ນັ້ນເພິ່ງຕ້ອງວິວາທະກັນດ້ວຍຄວາມຖືຕົວນັ້ນ
ບຸກຄົນບໍ່ຫວັ່ນໄຫວຍ້ອນຄວາມຖືຕົວ ໓ ຢ່າງ
ຄວາມສຳຄັນວ່າ ເຮົາສະເໝີເຂົາ ເລີດກວ່າເຂົາ
(ຫຼືດ້ອຍກວ່າເຂົາ) ຈຶ່ງບໍ່ມີແກ່ບຸກຄົນນັ້ນ

[໗໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນຜູ້ເປັນພາມນັ້ນເພິ່ງກ່າວອັນໃດວ່າ ຈິງ
ຫຼືບຸກຄົນຜູ້ເປັນພາມນັ້ນເພິ່ງໂຕ້ຖຽງວ່າ ຕົວະ ດ້ວຍເຫດອັນໃດ
ຄວາມສຳຄັນວ່າເຮົາສະເໝີເຂົາ ເຮົາເລີດກວ່າເຂົາ
(ຫຼືເຮົາດ້ອຍກວ່າເຂົາ) ຍ່ອມບໍ່ມີໃນພຣະອະຣະຫັນໃດ
ພຣະອະຣະຫັນນັ້ນ ເພິ່ງຕອບໂຕ້ວາທະ ດ້ວຍເຫດອັນໃດນໍ?

ຄຳວ່າ ພາມ ໃນຄຳວ່າ ບຸກຄົນຜູ້ເປັນພາມນັ້ນເພິ່ງກ່າວອັນໃດວ່າ ຈິງ ອະທິບາຍວ່າ ບຸກຄົນຊື່ວ່າເປັນພາມ ຍ້ອນລອຍທຳ ໆ ປະການໄດ້ແລ້ວ ຯລຯ ບຸກຄົນນັ້ນບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ ບັນດິດຮຽກຜູ້ນັ້ນວ່າ ເປັນພາມ

ຄຳວ່າ ບຸກຄົນຜູ້ເປັນພາມນັ້ນເພິ່ງກ່າວອັນໃດວ່າ ຈິງ ອະທິບາຍວ່າ ບຸກຄົນ ຜູ້ເປັນພາມເພິ່ງກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງອັນໃດວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະເພິ່ງກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງອັນໃດວ່າ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ບຸກຄົນຜູ້ເປັນພາມນັ້ນເພິ່ງກ່າວອັນໃດວ່າຈິງ

ຄຳວ່າ ຫຼືບຸກຄົນຜູ້ເປັນພາມນັ້ນເພິ່ງໂຕ້ຖຽງວ່າ ຕົວະ ດ້ວຍເຫດອັນໃດ ອະທິບາຍວ່າ ບຸກຄົນຜູ້ເປັນພາມເພິ່ງກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການ ແກ່ງແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍ ດ້ວຍມານະອັນໃດ ດ້ວຍທິດຖິອັນໃດ ຫຼື ກັບ ບຸກຄົນໃດວ່າ ຄຳຂອງເຮົາຈິງ ຄຳຂອງທ່ານຕົວະ ຯລຯ ທ່ານບໍ່ຮູ້ທຳວິໄນນີ້ ຯລຯ ຫຼືຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ ລວມຄວາມວ່າ ຫຼືບຸກຄົນຜູ້ເປັນພາມນັ້ນເພິ່ງ ໂຕ້ຖຽງວ່າ ຕົວະ ດ້ວຍເຫດອັນໃດ

ຄຳວ່າ ໃນພຣະອະຣະຫັນໃດ ໃນຄຳວ່າ ຄວາມສຳຄັນວ່າ ເຮົາສະເໝີເຂົາ ເຮົາເລີດກວ່າເຂົາ (ຫຼືເຮົາດ້ອຍກວ່າເຂົາ) ຍ່ອມບໍ່ມີໃນພຣະອະຣະຫັນໃດ ອະທິບາຍວ່າ ໃນພຣະອະຣະຫັນ ຄື ພຣະຂີນາສົບໃດ ບໍ່ມີຄວາມຖືຕົວວ່າ ເຮົາສະເໝີເຂົາ ບໍ່ມີຄວາມຖືດີວ່າ ເຮົາເລີດກວ່າເຂົາ ບໍ່ມີຄວາມດູໝິ່ນວ່າ ເຮົາດ້ອຍກວ່າເຂົາ ຄື ບໍ່ຜາກົດ ຫາບໍ່ໄດ້ ໄດ້ແກ່ ຄວາມຖືຕົວນັ້ນພຣະ

ອະຣະຫັນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ຄວາມສໍາຄັນວ່າ ເຮົາສະ ເໝີເຂົາ ເຮົາເລີດກວ່າເຂົາ (ຫຼືເຮົາດ້ອຍກວ່າເຂົາ) ຍ່ອມບໍ່ມີໃນພຣະອະຣະຫັນໃດ

ຄໍາວ່າ ພຣະອະຣະຫັນນັ້ນ ເພິ່ງຕອບໂຕ້ວາທະ ດ້ວຍເຫດອັນໃດນໍ? ອະທິບາຍວ່າ ພຣະອະຣະຫັນນັ້ນ ເພິ່ງຕອບໂຕ້ວາທະ ຄື ເພິ່ງໂຕ້ຖຽງ ເພິ່ງກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການຍາດແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍ ດ້ວຍເຫດອັນໃດ ດ້ວຍທິດຖິ ອັນໃດ ຫຼື ກັບບຸກຄົນໃດວ່າ ທ່ານບໍ່ຮູ້ທໍາວິໄນນີ້ ຯລຯ ຫຼື ຫາກທ່ານສາມາດ ກໍຈົ່ງ ແກ້ໄຂເທີ້ນ ລວມຄວາມວ່າ ພຣະອະຣະຫັນນັ້ນ ເພິ່ງຕອບໂຕ້ວາທະ ດ້ວຍເຫດອັນໃດນໍ? ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນຜູ້ເປັນພາມນັ້ນເພິ່ງກ່າວອັນໃດວ່າ ຈິງ
ຫຼືບຸກຄົນຜູ້ເປັນພາມນັ້ນເພິ່ງໂຕ້ຖຽງວ່າ ຕົວະ ດ້ວຍເຫດອັນໃດ
ຄວາມສໍາຄັນວ່າເຮົາສະເໝີເຂົາ ເຮົາເລີດກວ່າເຂົາ
(ຫຼືເຮົາດ້ອຍກວ່າເຂົາ) ຍ່ອມບໍ່ມີໃນພຣະອະຣະຫັນໃດ
ພຣະອະຣະຫັນນັ້ນ ເພິ່ງຕອບໂຕ້ວາທະ ດ້ວຍເຫດອັນໃດນໍ?

[໗໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນລະບ່ອນອາໄສແລ້ວ ບໍ່ທ່ຽວຊ່ານໄປຫາບ່ອນອາໄສ
ມຸນີບໍ່ເຮັດຄວາມມີເຍື່ອໃຍໃນກາມ ວ່າງຈາກກາມທັງຫຼາຍ
ບໍ່ມຸ້ງໝາຍອັດຕະພາບຕໍ່ໄປ ບໍ່ເພິ່ງກ່າວຄໍາເວົ້າຂັດແຍ່ງກັນ

ຄັ້ງນັ້ນແລ ຫາລິນທະການິຄະຫະບໍດີ ເຂົ້າໄປຫາທ່ານພຣະມະຫາກັດຈາຍະນະເຖິງບ່ອນຢູ່ ຂາບທ່ານພຣະມະຫາກັດຈາຍະນະແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ເມື່ອແລ້ວໄດ້ຖາມທ່ານພຣະມະຫາກັດຈາຍະນະວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ ໃນມາຄັນທິຍະປັນຫາ ອັນມາໃນອັດຖະກະວັກວ່າ

ບຸກຄົນລະທີ່ອາໄສແລ້ວ ບໍ່ທ່ຽວຊ່ານໄປຫາບ່ອນອາໄສ
ມຸນີບໍ່ເຮັດຄວາມມີເຍື່ອໃຍໃນກາມ ວ່າງຈາກກາມທັງຫຼາຍ
ບໍ່ມຸ້ງໝາຍອັດຕະພາບຕໍ່ໄປ ບໍ່ເພິ່ງກ່າວຄໍາເວົ້າຂັດແຍ່ງກັນ

ຂ້າແດ່ ທ່ານມະຫາກັດຈາຍະນະຜູ້ຈະເລີນ ເນື້ອຄວາມແຫ່ງພາສິດທີ່ພຣະຜູ້ມີພຣະພາກເຈົ້າ ຕັດແລ້ວໂດຍຫຍໍ້ນີ້ ເພິ່ງຮູ້ໂດຍພິດສະດານແນວໃດໄດ້

ທ່ານພຣະມະຫາກັດຈາຍະນະຕອບວ່າ ທ່ານຄະຫະບໍດີ ຮູບທາດເປັນບ່ອນອາໄສແຫ່ງວິນຍານ ວິນຍານທີ່ຜູກພັນໄວ້ດ້ວຍຣາຄະໃນຮູບທາດ ຕັດຮຽກວ່າ ການທ່ຽວຊ່ານໄປຫາບ່ອນ

ອາໄສ ເວທະນາທາດ ຯລຯ ສັນຍາທາດ ຯລຯ ສັງຂານທາດ ເປັນບ່ອນອາໄສແຫ່ງວິນຍານ ວິນຍານທີ່ຜູກພັນໄວ້ດ້ວຍຣາຄະໃນສັງຂານທາດ ຕັດຮຽກວ່າ ການຫ່ຽວຊ່ານໄປຫາບ່ອນອາໄສ ທ່ານຄະຫະບໍດີ ບຸກຄົນຜູ້ຫ່ຽວຊ່ານໄປຫາບ່ອນອາໄສ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນຜູ້ບໍ່ຫ່ຽວຊ່ານໄປຫາບ່ອນອາໄສ ເປັນແນວໃດ?

ຄື ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຢຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນເນື່ອງແຫ່ງຮູບທາດ ພຣະ ຕະຖາຄົດຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສະນັ້ນ ບັນດິດຈຶ່ງຮຽກ ພຣະຕະຖາຄົດວ່າ ຜູ້ບໍ່ຊົງຫ່ຽວຊ່ານໄປຫາບ່ອນອາໄສ ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຢຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນເນື່ອງແຫ່ງເວທະນາທາດ ຯລຯ ສັນຍາທາດ ຯລຯ ສັງຂານທາດ ຯລຯ ວິນຍານທາດ ພຣະຕະຖາຄົດ ຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສະນັ້ນ ບັນດິດຈຶ່ງຮຽກ ພຣະຕະຖາຄົດວ່າ ຜູ້ບໍ່ຊົງຫ່ຽວຊ່ານໄປຫາບ່ອນອາໄສ ທ່ານຄະຫະບໍດີ ບຸກຄົນຜູ້ບໍ່ຫ່ຽວຊ່ານໄປຫາບ່ອນອາໄສ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນຜູ້ຫ່ຽວຊ່ານໄປຫາບ່ອນອາໄສ ເປັນແນວໃດ?

ຄື ຄວາມຫ່ຽວຊ່ານໄປຫາແລະຄວາມຜູກພັນກັບບ່ອນອາໄສ ຄື ຮູບນິມິດ ຯລຯ ສັດທະນິມິດ ຯລຯ ຄັນທະນິມິດ ຯລຯ ຣົດນິມິດ ຯລຯ ໂຜດຖັບພະນິມິດ ຯລຯ ທຳມະນິມິດ ຕັດຮຽກວ່າ ຜູ້ຫ່ຽວຊ່ານໄປຫາບ່ອນອາໄສ ທ່ານຄະຫະບໍດີ ບຸກຄົນຜູ້ຫ່ຽວຊ່ານໄປຫາບ່ອນອາໄສ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນຜູ້ບໍ່ຫ່ຽວຊ່ານໄປຫາບ່ອນອາໄສ ເປັນແນວໃດ?

ຄື ຄວາມຊ່ານໄປຫາ ແລະຄວາມຜູກພັນກັບບ່ອນອາໄສ ຄື ຮູບນິມິດ ຯລຯ ສັດທະນິມິດ ຯລຯ ຄັນທະນິມິດ ຯລຯ ຣົດນິມິດ ຯລຯ ໂຜດຖັບພະນິມິດ ຯລຯ ທຳມະນິມິດ ພຣະຕະຖາຄົດຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສະນັ້ນ ບັນດິດຈຶ່ງຮຽກພຣະຕະຖາຄົດວ່າ ຜູ້ບໍ່ຊົງຫ່ຽວຊ່ານໄປຫາບ່ອນອາໄສ ທ່ານຄະຫະບໍດີ ບຸກຄົນຜູ້ບໍ່ຫ່ຽວຊ່ານໄປຫາບ່ອນອາໄສ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນເກີດຄວາມມີເຍື່ອໃຍໃນກາມ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ກ່ຽວຂ້ອງຢູ່ກັບຄະລຶຫັດ ເພີດເພີນຮ່ວມກັນ ເສົ້າໂສກຮ່ວມກັນ ເມື່ອພວກເຂົາສຸກກໍສຸກດ້ວຍ ເມື່ອພວກເຂົາທຸກກໍທຸກດ້ວຍ ເມື່ອພວກເຂົາມີກິດທີ່ຄວນ

ເຮັດເກີດຂຶ້ນ ກໍລົງມືຊ່ວຍເຫຼືອດ້ວຍຕົນເອງ ທ່ານຄະຫະບໍດີ ບຸກຄົນເກີດຄວາມມີເຍື່ອໃຍໃນການ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນບໍ່ເກີດຄວາມມີເຍື່ອໃຍໃນການ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ບໍ່ກ່ຽວຂ້ອງຢູ່ກັບຄະລືຫັດ ບໍ່ເພີດເພີນ ຮ່ວມກັນ ບໍ່ເສົ້າໂສກຮ່ວມກັນ ເມື່ອພວກເຂົາສຸກກໍບໍ່ໄດ້ສຸກດ້ວຍ ເມື່ອພວກເຂົາທຸກກໍບໍ່ໄດ້ທຸກດ້ວຍ ເມື່ອພວກເຂົາມີກິດທີ່ຄວນເຮັດເກີດຂຶ້ນ ກໍບໍ່ລົງມືຊ່ວຍເຫຼືອດ້ວຍຕົນເອງ ທ່ານ ຄະຫະບໍດີ ບຸກຄົນບໍ່ເກີດຄວາມມີເຍື່ອໃຍໃນການ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນບໍ່ວ່າງຈາກການທັງຫຼາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກ ຄວາມພໍໃຈບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມກະຫາຍ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຕັນຫາໃນການທັງຫຼາຍ ທ່ານຄະຫະບໍດີ ບຸກຄົນບໍ່ວ່າງຈາກການທັງຫຼາຍ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນວ່າງຈາກການທັງຫຼາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມກະຫາຍ ປາສະຈາກຄວາມຮ້ອນຮົນ ປາສະຈາກຕັນຫາໃນການທັງຫຼາຍ ທ່ານຄະຫະບໍດີ ບຸກຄົນວ່າງຈາກການທັງຫຼາຍ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນມຸ້ງຫວັງອັດຕະພາບຕໍ່ໄປ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ມີຄວາມມຸ້ງຫວັງແນວນີ້ວ່າ ໃນອະນາຄົດການ ເຮົາເພິ່ງມີຮູບແນວນີ້ ທ່ານກໍປະສົບຄວາມເພີດເພີນໃນຄວາມປາຖະໜານັ້ນ ມີຄວາມ ມຸ້ງຫວັງແນວນີ້ວ່າ ໃນອະນາຄົດການ ເຮົາເພິ່ງມີເວທະນາແນວນີ້ ຯລຯ ເພິ່ງມີສັນຍາແນວນີ້ ຯລຯ ເພິ່ງມີສັງຂານແນວນີ້ ຯລຯ ເພິ່ງມີວິນຍານແນວນີ້ ທ່ານກໍປະສົບຄວາມເພີດເພີນໃນຄວາມປາຖະໜານັ້ນ ທ່ານຄະຫະບໍດີ ບຸກຄົນມຸ້ງຫວັງອັດຕະພາບຕໍ່ໄປ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນບໍ່ມຸ້ງຫວັງອັດຕະພາບຕໍ່ໄປ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ບໍ່ມີຄວາມມຸ້ງຫວັງແນວນີ້ວ່າ ໃນອະນາຄົດການ ເຮົາເພິ່ງມີຮູບແນວນີ້ ບໍ່ມີຄວາມມຸ້ງຫວັງແນວນີ້ວ່າ ໃນອະນາຄົດການ ເຮົາເພິ່ງມີເວທະນາ ແນວນີ້ ຯລຯ ເພິ່ງມີສັນຍາແນວນີ້ ຯລຯ ເພິ່ງມີສັງຂານແນວນີ້ ຯລຯ ເພິ່ງມີວິນຍານແນວນີ້ ທ່ານກໍບໍ່ປະສົບຄວາມເພີດເພີນໃນຄວາມປາຖະໜານັ້ນ ທ່ານຄະຫະບໍດີ ບຸກຄົນບໍ່ມຸ້ງຫວັງ ອັດຕະພາບຕໍ່ໄປ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນກ່າວຄຳເວົ້າຂັດແຍ່ງກັນ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ກ່າວຄຳເວົ້າເຫັນປານນີ້ວ່າ ທ່ານບໍ່ຮູ້ທຳວິໄນນີ້ ຯລຯ ຫຼື ຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ ທ່ານຄະຫະບໍດີ ບຸກຄົນກ່າວຄຳເວົ້າຂັດແຍ່ງກັນ ເປັນແນວນີ້ແລ

ທ່ານຄະຫະບໍດີ ບຸກຄົນບໍ່ກ່າວຄຳເວົ້າຂັດແຍ່ງກັນ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ບໍ່ກ່າວຄຳເວົ້າເຫັນປານນີ້ວ່າ ທ່ານບໍ່ຮູ້ທຳວິໄນນີ້ ຯລຯ ຫຼື ຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ ທ່ານຄະຫະບໍດີ ບຸກຄົນບໍ່ກ່າວຄຳເວົ້າຂັດແຍ່ງກັນ ເປັນແນວນີ້ແລ

ທ່ານຄະຫະບໍດີ ພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນມາຄັນທິຍະປັນຫາ ອັນມາໃນອັດຖະກະວັກວ່າ

ບຸກຄົນລະບ່ອນອາໄສແລ້ວ ບໍ່ທ່ຽວຊ່ານໄປຫາບ່ອນອາໄສ
ມຸນີບໍ່ເຮັດຄວາມມິເຍື່ອໃຍໃນກາມ ວ່າງຈາກກາມທັງຫຼາຍ
ບໍ່ມຸ້ງໝາຍອັດຕະພາບຕໍ່ໄປ ບໍ່ເພິ່ງກ່າວຄຳເວົ້າຂັດແຍ່ງກັນ ດັ່ງນີ້ແລ

ທ່ານຄະຫະບໍດີ ເນື້ອຄວາມແຫ່ງພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ ເພິ່ງຮູ້ໂດຍພິດສະດານແນວນີ້ແລ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນລະບ່ອນອາໄສແລ້ວ ບໍ່ທ່ຽວຊ່ານໄປຫາບ່ອນອາໄສ
ມຸນີບໍ່ເຮັດຄວາມມິເຍື່ອໃຍໃນກາມ ວ່າງຈາກກາມທັງຫຼາຍ
ບໍ່ມຸ້ງໝາຍອັດຕະພາບຕໍ່ໄປ ບໍ່ເພິ່ງກ່າວຄຳເວົ້າຂັດແຍ່ງກັນ

[໗໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນຜູ້ນາຄະສະຫງັດຈາກທິດຖິເຫຼົ່າໃດ
ເພິ່ງທ່ຽວໄປໃນໂລກ ບໍ່ເພິ່ງເວົ້າຈາຢຶດຖືທິດຖິເຫຼົ່ານັ້ນ
ດອກບົວກ້ານມີໜາມເກີດໃນນ້ຳ
ບໍ່ເປິເປື້ອນດ້ວຍນ້ຳແລະຕົມ ສັນໃດ
ມຸນີຜູ້ກ່າວເລື້ອງຄວາມສະງົບ ກໍບໍ່ຍິນດີ
ບໍ່ເປິເປື້ອນໃນກາມແລະໂລກ ສັນນັ້ນ

ຄຳວ່າ ເຫຼົ່າໃດ ໃນຄຳວ່າ ບຸກຄົນຜູ້ນາຄະສະຫງັດຈາກທິດຖິເຫຼົ່າໃດ ເພິ່ງທ່ຽວໄປໃນໂລກ ໄດ້ແກ່ ທິດຖິທັງຫຼາຍ

ຄຳວ່າ ສະຫງັດ ໄດ້ແກ່ ວ່າງ ສະຫງັດ ງຽບ ຈາກກາຍທຸດຈະຣິດ ຯລຯ ຈາກວະຈີທຸດຈະຣິດ ຯລຯ ຈາກມະໂນທຸດຈະຣິດ ຯລຯ ຈາກຣາຄະ ຯລຯ ວ່າງສະຫງັດ ງຽບຈາກອະກຸສະລາພິສັງຂານທຸກປະເພດ

ຄຳວ່າ ເພິ່ງທ່ຽວໄປ ໄດ້ແກ່ ເພິ່ງທ່ຽວໄປ ຄື ເພິ່ງຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ

ຄຳວ່າ ໃນໂລກ ໄດ້ແກ່ ໃນມະນຸດໂລກ ລວມຄວາມວ່າ ບຸກຄົນຜູ້ນາຄະສະຫງັດຈາກທິດຖິເຫຼົ່າໃດ ເພິ່ງທ່ຽວໄປໃນໂລກ

ຄຳວ່າ ຜູ້ນາຄະ ໃນຄຳວ່າ ຜູ້ນາຄະ ຯລຯ ບໍ່ເພິ່ງເວົ້າຈາຢຶດຖືທິດຖິເຫຼົ່ານັ້ນ ອະທິບາຍວ່າ ຊື່ວ່າບຸກຄົນຜູ້ນາຄະ ຍ້ອນບໍ່ເຮັດຄວາມຊົ່ວ ຊື່ວ່າບຸກຄົນຜູ້ນາຄະ ຍ້ອນບໍ່ເຖິງ ຊື່ວ່າບຸກຄົນຜູ້ນາຄະ ຍ້ອນບໍ່ກັບມາຫາ

ບຸກຄົນຊື່ວ່າຜູ້ນາຄະ ຍ້ອນບໍ່ເຮັດຄວາມຊົ່ວ ເປັນແນວໃດ?

ຄື ບາບອະກຸສົນທຳທັງຫຼາຍ ເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມ ກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ແລະມໍຣະນະຕໍ່ໄປ ຕັດຮຽກວ່າຄວາມຊົ່ວ (ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ສະພິຍະ)

ບຸກຄົນຜູ້ບໍ່ເຮັດບາບແມ່ນເລັກໜ້ອຍໃນໂລກ
ສະລັດສັງໂຍດເຄື່ອງຜູກພັນໄດ້ທັງໝົດ
ບໍ່ຕິດຂ້ອງຢູ່ໃນທຳເປັນເຄື່ອງຂ້ອງທັງປວງ ເປັນຜູ້ຫຼຸດພົ້ນ
ດຳຣົງຕົນໝັ້ນຄົງເຊັ່ນນັ້ນ ບັນດິດທັງຫຼາຍຮຽກວ່າ ຜູ້ນາຄະ
ບຸກຄົນຊື່ວ່າຜູ້ນາຄະ ຍ້ອນບໍ່ເຮັດຄວາມຊົ່ວ ເປັນແນວນີ້
ບຸກຄົນຊື່ວ່າຜູ້ນາຄະ ຍ້ອນບໍ່ເຖິງ ເປັນແນວໃດ?

ຄື ບຸກຄົນບໍ່ເຖິງສັນທາຄະຕິ (ລຳອຽງຍ້ອນຮັກ) ບໍ່ເຖິງໂທສາຄະຕິ (ລຳອຽງຍ້ອນຊັງ) ບໍ່ເຖິງໂມຫາຄະຕິ (ລຳອຽງຍ້ອນຫຼົງ) ບໍ່ເຖິງພະຍາຄະຕິ (ລຳອຽງຍ້ອນຢ້ານ) ບໍ່ດຳເນີນໄປດ້ວຍອຳນາດຣາຄະ ບໍ່ດຳເນີນໄປດ້ວຍອຳນາດໂທສະ ບໍ່ດຳເນີນໄປດ້ວຍອຳນາດໂມຫະ ບໍ່ດຳເນີນໄປດ້ວຍອຳນາດມານະ ບໍ່ດຳເນີນໄປດ້ວຍອຳນາດທິດຖິ ບໍ່ດຳເນີນໄປດ້ວຍອຳນາດ ອຸດທັດຈະບໍ່ດຳເນີນໄປດ້ວຍອຳນາດວິຈິກິດສາ ບໍ່ດຳເນີນໄປດ້ວຍອຳນາດອະນຸໄສ ໄດ້ແກ່ ບໍ່ໄປ ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປ ດ້ວຍທຳທີ່ກໍ່ຄວາມເປັນຝັກເປັນຝ່າຍ ບຸກຄົນຊື່ວ່າ ຜູ້ນາຄະ ຍ້ອນບໍ່ເຖິງເປັນແນວນີ້

ບຸກຄົນຊື່ວ່າຜູ້ນາຄະ ຍ້ອນບໍ່ກັບມາຫາ ເປັນແນວໃດ?

ຄື ກິເລດເຫຼົ່າໃດອະຣິຍະບຸກຄົນລະໄດ້ແລ້ວ ດ້ວຍໂສດາປັດຕິມັກ ອະຣິຍະບຸກຄົນນັ້ນກໍຍ່ອມບໍ່ມາ ບໍ່ກັບມາ ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດ ອະຣິຍະບຸກຄົນລະໄດ້ແລ້ວດ້ວຍສະກະທາຄາມິມັກ ຯລຯ ດ້ວຍອະນາຄາມິມັກ ຯລຯ ດ້ວຍອະຣະຫັດຕະມັກ ອະຣິຍະບຸກຄົນນັ້ນກໍຍ່ອມບໍ່ມາ ບໍ່ກັບມາ ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ບຸກຄົນຊື່ວ່າຜູ້ນາຄະ ຍ້ອນບໍ່ກັບມາຫາ ເປັນແນວນີ້

ຄຳວ່າ ບຸກຄົນຜູ້ນາຄະ ຯລຯ ບໍ່ເພິ່ງເວົ້າຈາຍຶດຖືທິດຖິເຫຼົ່ານັ້ນ ອະທິບາຍວ່າ ບຸກຄົນຜູ້ນາຄະ ບໍ່ເພິ່ງເວົ້າຈາ ຄື ບໍ່ເພິ່ງເວົ້າ ກ່າວ ສະແດງ ຊີ້ແຈ່ງ ຍຶດ ຈັບ ຖື ຍຶດໝັ້ນ ຖືໝັ້ນທິດຖິເຫຼົ່ານັ້ນ ໄດ້ແກ່ ບໍ່ເພິ່ງເວົ້າຈາ ຄື ບໍ່ເພິ່ງເວົ້າ ກ່າວ ສະແດງ ຊີ້ແຈ່ງວ່າ ໂລກທ່ຽງ ຯລຯ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ບຸກຄົນຜູ້ນາຄະ ຯລຯ ບໍ່ເພິ່ງເວົ້າຈາ ຍຶດຖືທິດຖິ ເຫຼົ່ານັ້ນ

ຄຳວ່າ ດອກບົວກ້ານມີໜາມເກີດໃນນ້ຳ ບໍ່ເປິເປື້ອນດ້ວຍນ້ຳແລະຕົມ ສັນໃດ ອະທິບາຍວ່າ ນ້ຳ ຕັດຮຽກວ່າ ເອລະ ນ້ຳ ຕັດຮຽກວ່າ ອຳພຸ ດອກບົວ ຕັດ ຮຽກວ່າ ອຳພຸຊະ ກ້ານຊຸຊະ ຕັດຮຽກວ່າມີໜາມ ນ້ຳ ຕັດຮຽກວ່າ ວາຣີ ດອກບົວ ເກີດໃນນ້ຳ ຕັດຮຽກວ່າ ວາຣິຊະ ນ້ຳ ຕັດຮຽກວ່າ ຊະລະ ເປືອກຕົມຕັດຮຽກວ່າຕົມ ດອກບົວເກີດໃນນ້ຳ ຢູ່ໃນນ້ຳ (ແຕ່) ບໍ່ຕິດ ບໍ່ຕິດແໜ້ນ ບໍ່ເປິເປື້ອນດ້ວຍນ້ຳແລະຕົມ ຄື ບໍ່ຖືກນ້ຳແລະຕົມຕິດແລ້ວ ຕິດແໜ້ນແລ້ວ ເປິເປື້ອນແລ້ວ ສັນໃດ ລວມຄວາມວ່າ ດອກບົວກ້ານມີໜາມເກີດໃນນ້ຳ ບໍ່ເປິເປື້ອນດ້ວຍນ້ຳແລະຕົມ ສັນໃດ

ຄຳວ່າ ສັນນັ້ນ ໃນຄຳວ່າ ມຸນີຜູ້ກ່າວເລື້ອງຄວາມສະງົບ ກໍບໍ່ຍິນດີ ບໍ່ເປິເປື້ອນໃນກາມແລະໂລກ ສັນນັ້ນ ເປັນຄຳອຸປະໄນທີ່ເຮັດອຸປະມາໃຫ້ສົມບູນ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ຜູ້ກ່າວເລື້ອງຄວາມສະງົບ ອະທິບາຍວ່າ ມຸນີຜູ້ກ່າວເລື້ອງຄວາມສະງົບ ຄື ກ່າວເລື້ອງທີ່ປ້ອງກັນ ກ່າວເລື້ອງທີ່ຫຼົບຫຼີກ ກ່າວເລື້ອງບ່ອນເພິ່ງ ກ່າວເລື້ອງທີ່ບໍ່ມີໄພ ກ່າວເລື້ອງທີ່ບໍ່ຄາດເຄື່ອນ ກ່າວເລື້ອງອະມະຕະທຳ ກ່າວເລື້ອງນິບພານ ລວມຄວາມວ່າ ມຸນີຜູ້ກ່າວເລື້ອງຄວາມສະງົບ ຯລຯ ສັນນັ້ນ

ຄຳວ່າ ບໍ່ຍິນດີ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມຍິນດີ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຕັນຫາທີ່ຕັດຮຽກວ່າຄວາມຍິນດີນັ້ນ ມຸນີໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະ ງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ມຸນີນັ້ນ ຕັດຮຽກ ວ່າ ຜູ້ບໍ່ຍິນດີ ຄື ຜູ້ບໍ່ຍິນດີ ບໍ່ຕິດໃຈ ບໍ່ສະຍົບ ບໍ່ມົກມຸ້ນໃນຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລາ ນະປັດໄຈເພສັດບໍຣິຂານ ຯລຯ ການທາດ ຯລຯ ຮູບທາດ ຯລຯ ອະຮູບທາດ ຯລຯ ການະ ພົບ ຯລຯ ຮູບພົບ ຯລຯ ອະຮູບພົບ ຯລຯ ສັນຍາພົບ ຯລຯ ອະສັນຍາພົບ ຯລຯ ເນວະສັນ ຍານາສັນຍາພົບ ຯລຯ ເອກະໂວກາຣະພົບ ຯລຯ ຈະຕຸໂວກາຣະພົບ ຯລຯ ປັນຈະໂວກາຣະ ພົບ ຯລຯ

ອະດີດ ຯລຯ ອະນາຄົດ ຯລຯ ປັດຈຸບັນ ຄືຜູ້ບໍ່ຍິນດີ ບໍ່ຕິດໃຈ ບໍ່ສະຍົບ ບໍ່ມົກມຸ້ນໃນ ຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ໄດ້ແກ່ ເປັນ ຜູ້ຄາຍ ຄວາມຍິນດີແລ້ວ ປາສະຈາກຄວາມຍິນດີແລ້ວ ສະລະຄວາມຍິນດີແລ້ວ ຄາຍຄວາມຍິນ ດີແລ້ວ ປ່ອຍຄວາມຍິນດີແລ້ວ ລະຄວາມຍິນດີແລ້ວ ສະລັດຖິ້ມຄວາມຍິນດີແລ້ວ ຄື ເປັນຜູ້ຄາຍ ຄວາມກຳໜັດແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະ ແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ເປັນຜູ້ດັບແລ້ວ ເປັນ ຜູ້ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ມຸນີຜູ້ກ່າວເລື້ອງຄວາມສະງົບ ກໍບໍ່ ຍິນດີ ແນວນີ້

ຄຳວ່າ ບໍ່ເປີເປື້ອນໃນກາມແລະໂລກ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດ ກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດ ໂລກ ອາຍະຕະນະໂລກ

ຄຳວ່າ ເປີເປື້ອນ ໄດ້ແກ່ ຄວາມເປີເປື້ອນ ໒ ຢ່າງ ຄື (໑) ຄວາມເປີເປື້ອນດ້ວຍອຳນາດ ຕັນຫາ (໒) ຄວາມເປີເປື້ອນດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມເປີເປື້ອນດ້ວຍອຳນາດ ຕັນຫາ ຯລຯ ນີ້ຊື່ວ່າ ຄວາມເປີເປື້ອນດ້ວຍອຳນາດທິດຖິ

ມຸນີລະຄວາມເປີເປື້ອນດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມເປີເປື້ອນດ້ວຍ ອຳນາດທິດຖິໄດ້ແລ້ວ ຍ່ອມບໍ່ຕິດ ບໍ່ຕິດແໜ້ນ ບໍ່ເປີເປື້ອນໃນກາມແລະໃນໂລກ ຄື ເປັນຜູ້ບໍ່ຖືກ ຕັນຫາແລະທິດຖິຕິດ ຕິດແໜ້ນ ເປີເປື້ອນ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ ກ່ຽວຂ້ອງ (ໃນກາມແລະໃນໂລກ) ແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ

ມຸນີຜູ້ກ່າວເລື້ອງຄວາມສະງົບ ກໍບໍ່ຍິນດີ ບໍ່ເປິເປື້ອນໃນກາມແລະໂລກ ສັນນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນຜູ້ນາຄະສະຫງັດຈາກທິດຖິເຫຼົ່າໃດ
ເພິ່ງທ່ຽວໄປໃນໂລກ ບໍ່ເພິ່ງເວົ້າຈາຢຶດຖືທິດຖິເຫຼົ່ານັ້ນ
ດອກບົວກ້ານມີໜາມເກີດໃນນ້ຳ
ບໍ່ເປິເປື້ອນດ້ວຍນ້ຳແລະຕົມ ສັນໃດ
ມຸນີຜູ້ກ່າວເລື້ອງຄວາມສະງົບ ກໍບໍ່ຍິນດີ
ບໍ່ເປິເປື້ອນໃນກາມແລະໂລກ ສັນນັ້ນ

[໗໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີຜູ້ຈົບເວດນັ້ນ ຍ່ອມບໍ່ໄປດ້ວຍທິດຖິ
ບໍ່ເຖິງຄວາມຖືຕົວດ້ວຍອາລົມທີ່ຮັບຮູ້
ມຸນີນັ້ນຜູ້ບໍ່ມີຕັນຫາແລະທິດຖິນັ້ນ ບໍ່ຖືກກຳແລະສຸຕະນຳໄປ
ມຸນີນັ້ນບໍ່ຖືກຕັນຫາແລະທິດຖິນຳເຂົ້າໄປໃນບ່ອນອາໄສທັງຫຼາຍ

ຄຳວ່າ ບໍ່ ໃນຄຳວ່າ ມຸນີຜູ້ຈົບເວດນັ້ນ ຍ່ອມບໍ່ໄປດ້ວຍທິດຖິ ບໍ່ເຖິງຄວາມຖືຕົວດ້ວຍອາລົມທີ່ຮັບຮູ້ ເປັນຄຳປະຕິເສດ

ຄຳວ່າ ຜູ້ຈົບເວດ ອະທິບາຍວ່າ ຍານໃນມັກ ໔ ຕັດຮຽກວ່າ ເວດ ຄື ປັນຍາ

ປັນຍິນຊີ ປັນຍາພະລະ ທຳມະວິຈະຍະສຳໂພດຊົງ ປັນຍາເຄື່ອງພິຈາລະນາ ປັນຍາເຄື່ອງເຫັນແຈ້ງ ສຳມາທິດຖິ

ມຸນີນັ້ນ ເຖິງທີ່ສຸດ ບັນລຸທີ່ສຸດ ເຖິງສ່ວນສຸດ ບັນລຸສ່ວນສຸດ ເຖິງປາຍສຸດ ບັນລຸປາຍສຸດ ເຖິງທ້າຍສຸດ ບັນລຸທ້າຍສຸດ ເຖິງທີ່ປົກປ້ອງ ບັນລຸທີ່ປົກປ້ອງ ເຖິງທີ່ຫຼົບຫຼີກ ບັນລຸທີ່ຫຼົບຫຼີກ ເຖິງທີ່ເພິ່ງ ບັນລຸທີ່ເພິ່ງ ເຖິງທີ່ບໍ່ມີໄພ ບັນລຸທີ່ບໍ່ມີໄພ ເຖິງທີ່ບໍ່ຈຸຕິ ບັນລຸທີ່ບໍ່ຈຸຕິ ເຖິງທີ່ບໍ່ຕາຍ ບັນລຸທີ່ບໍ່ຕາຍ ເຖິງທີ່ດັບ ບັນລຸທີ່ດັບແຫ່ງຊາດ ຊະຣາແລະມໍຣະນະ ດ້ວຍເວດເຫຼົ່ານັ້ນ

ອີກໄນໜຶ່ງ ມຸນີນັ້ນ ຊື່ວ່າຜູ້ຈົບເວດ ຍ້ອນເຖິງທີ່ສຸດແຫ່ງເວດທັງຫຼາຍແລ້ວ

ອີກໄນໜຶ່ງ ຊື່ວ່າຜູ້ຈົບເວດ ຍ້ອນເຖິງທີ່ສຸດດ້ວຍເວດທັງຫຼາຍແລ້ວ

ອີກໄນໜຶ່ງ ຊື່ວ່າຜູ້ຈົບເວດ ຍ້ອນຮູ້ແຈ້ງທຳ ໗ ປະການແລ້ວ ຄື

໑. ຮູ້ແຈ້ງສັກກາຍະທິດຖິ
໒. ຮູ້ແຈ້ງສີລັບພະຕະປະຣາມາດ
໓. ຮູ້ແຈ້ງໂທສະ
໗. ຮູ້ແຈ້ງມານະແລ້ວ
໔. ຮູ້ແຈ້ງວິຈິກິດສາ
໕. ຮູ້ແຈ້ງຣາຄະ
໖. ຮູ້ແຈ້ງໂມຫະ

ມຸນີນັ້ນເປັນຜູ້ຮູ້ແຈ້ງບາບອະກຸສົນທຳ ເຊິ່ງເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນທີ່ຕັ້ງແຫ່ງຊາດ ຊະຣາ ແລະມໍຣະນະຕໍ່ໄປ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ສະພິຍະ)

ບຸກຄົນວິໄຈເວດທັງໝົດຂອງສະມະນະພາມທີ່ມີຢູ່
ເປັນຜູ້ປາສະຈາກຣາຄະໃນເວທະນາທັງປວງ
ກ້າວລ່ວງເວດທັງປວງແລ້ວ ຊື່ວ່າຜູ້ຈົບເວດ

ຄຳວ່າ ຍ່ອມບໍ່ໄປດ້ວຍທິດຖິ ອະທິບາຍວ່າ ທິດຖິ ໖໘ ມຸນີນັ້ນ ລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄື ຍານແລ້ວ ມຸນີນັ້ນ ບໍ່ໄປ ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປ ດ້ວຍທິດຖິ ທັງບໍ່ກັບມາ ບໍ່ຫວນກັບມາຫາທິດຖິນັ້ນ ໂດຍເຫັນເປັນສາຣະອີກ ລວມຄວາມວ່າ ມຸນີຜູ້ຈົບເວດນັ້ນ ຍ່ອມບໍ່ໄປດ້ວຍທິດຖິ

ຄຳວ່າ ມຸນີນັ້ນຍ່ອມບໍ່ເຖິງຄວາມຖືຕົວດ້ວຍອາລົມທີ່ຮັບຮູ້ ອະທິບາຍວ່າ ມຸນີນັ້ນ ຍ່ອມບໍ່ເຖິງ ຄື ບໍ່ເຂົ້າເຖິງ ບໍ່ເຂົ້າໄປຫາ ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນ ຄວາມຖືຕົວ ດ້ວຍຮູບທີ່ຮູ້ແລ້ວ ດ້ວຍສຽງບອກເລົ່າຂອງຜູ້ອື່ນ ຫຼື ດ້ວຍສົມມຸດຂອງມະຫາຊົນ ລວມຄວາມວ່າ ມຸນີຜູ້ຈົບເວດນັ້ນ ຍ່ອມບໍ່ໄປດ້ວຍທິດຖິ ບໍ່ເຖິງຄວາມຖືຕົວດ້ວຍອາລົມທີ່ຮັບຮູ້

ຄຳວ່າ ມຸນີນັ້ນຜູ້ບໍ່ມີຕັນຫາແລະທິດຖິນັ້ນ ອະທິບາຍວ່າ ມຸນີນັ້ນຜູ້ບໍ່ມີຕັນຫາແລະ ທິດຖິນັ້ນ ຄື ບໍ່ມີຕັນຫາແລະທິດຖິນັ້ນເປັນຢ່າງຍິ່ງ ບໍ່ມີຕັນຫາແລະທິດຖິນັ້ນເປັນທີ່ໄປໃນເບື້ອງໜ້າດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິ ຕັນຫາ ທິດຖິ ແລະມານະ ມຸນີນັ້ນລະ ໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດ້ວຍເຫດໃດ ມຸນີນັ້ນ ກໍຊື່ວ່າບໍ່ມີຕັນຫາ ແລະທິດຖິນັ້ນ ຄື ບໍ່ມີຕັນຫາແລະທິດຖິນັ້ນເປັນຢ່າງຍິ່ງ ບໍ່ມີຕັນຫາແລະທິດຖິນັ້ນເປັນທີ່ໄປໃນເບື້ອງໜ້າດ້ວຍເຫດນັ້ນ ລວມຄວາມວ່າ ມຸນີນັ້ນຜູ້ບໍ່ມີຕັນຫາ ແລະທິດຖິນັ້ນ

ຄຳວ່າ ບໍ່ຖືກກຳ ໃນຄຳວ່າ ບໍ່ຖືກກຳແລະສຸຕະນຳໄປ ອະທິບາຍວ່າ ມຸນີ ບໍ່ໄປ ຄື ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປ ດ້ວຍປຸນຍາພິສັງຂານ ອະປຸນຍາພິສັງຂານ ຫຼື ອາເນນຊາພິສັງຂານ ລວມຄວາມວ່າ ບໍ່ຖືກກຳ

ຄຳວ່າ ບໍ່ຖືກ ຯລຯ ແລະສຸຕະນຳໄປ ອະທິບາຍວ່າ ມຸນີ ບໍ່ໄປ ຄື ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປ ດ້ວຍຄວາມມົດຈົດດ້ວຍສຸຕະ ດ້ວຍສຽງບອກເລົ່າຂອງຜູ້ອື່ນ ຫຼື ດ້ວຍການສົມມຸດຂອງມະຫາຊົນ ລວມຄວາມວ່າ ບໍ່ຖືກກຳແລະສຸຕະນຳໄປ

ຄຳວ່າ ມຸນີນັ້ນບໍ່ຖືກຕັນຫາແລະທິດຖິນຳເຂົ້າໄປໃນບ່ອນອາໄສທັງຫຼາຍ ອະທິບາຍວ່າ

ຄຳວ່າ ການນຳເຂົ້າໄປ ໄດ້ແກ່ ການນຳເຂົ້າໄປ ໒ ຢ່າງ ຄື (໑) ການນຳເຂົ້າໄປດ້ວຍອຳນາດຕັນຫາ (໒) ການນຳເຂົ້າໄປດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າການນຳເຂົ້າໄປດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການນຳເຂົ້າໄປດ້ວຍອຳນາດທິດຖິ

ມຸນີນັ້ນລະການນຳເຂົ້າໄປດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການນຳເຂົ້າໄປດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການນຳເຂົ້າໄປດ້ວຍອຳນາດຕັນຫາ ສະລັດຖິ້ມການນຳເຂົ້າໄປດ້ວຍອຳນາດທິດຖິໄດ້ແລ້ວ ມຸນີນັ້ນ ຊື່ວ່າບໍ່ຖືກຕັນຫາແລະທິດຖິນຳເຂົ້າໄປ ຄື ບໍ່ເຂົ້າ ໄປຕິດ ບໍ່ເຂົ້າໄປເຖິງ ບໍ່ຕິດໃຈ ບໍ່ນ້ອມໃຈເຊື່ອ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງໃນບ່ອນອາໄສທັງຫຼາຍແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ)ຢູ່ ລວມຄວາມວ່າ ມຸນີນັ້ນ ບໍ່ຖືກຕັນຫາແລະທິດຖິນຳເຂົ້າໄປໃນບ່ອນອາໄສທັງຫຼາຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີຜູ້ຈົບເວດນັ້ນ ຍ່ອມບໍ່ໄປດ້ວຍທິດຖິ
ບໍ່ເຖິງຄວາມຖືຕົວດ້ວຍອາລົມທີ່ຮັບຮູ້
ມຸນີນັ້ນຜູ້ບໍ່ມີຕັນຫາແລະທິດຖິນັ້ນ ບໍ່ຖືກກຳແລະສຸຕະນຳໄປ
ມຸນີນັ້ນບໍ່ຖືກຕັນຫາແລະທິດຖິນຳເຂົ້າໄປໃນບ່ອນອາໄສທັງຫຼາຍ

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີຜູ້ເວັ້ນຈາກສັນຍາແລ້ວ ຍ່ອມບໍ່ມີກິເລດເຄື່ອງຮ້ອຍຮັດ
ມຸນີຜູ້ຫຼຸດພົ້ນດ້ວຍປັນຍາແລ້ວ ຍ່ອມບໍ່ມີຄວາມລຸ້ມຫຼົງ
ຊົນເຫຼົ່າໃດຍັງຖືສັນຍາແລະທິດຖິ
ຊົນເຫຼົ່ານັ້ນ ຍ່ອມທ່ຽວກະທົບກະທັ່ງກັນໃນໂລກ

ຄຳວ່າ ມຸນີເວັ້ນຈາກສັນຍາແລ້ວ ຍ່ອມບໍ່ມີກິເລດເຄື່ອງຮ້ອຍຮັດ ອະທິບາຍວ່າ ຜູ້ໃດຈະເລີນອະຣິຍະມັກ ທີ່ມີສະມະຖະເປັນເບື້ອງຕົ້ນ ຜູ້ນັ້ນ ຍ່ອມຂົ່ມກິເລດເຄື່ອງຮ້ອຍຮັດແລ້ວຕັ້ງແຕ່ຕົ້ນ ເມື່ອບັນລຸອະຣະຫັດຕະຜົນແລ້ວ ພຣະອະຣະຫັນຍ່ອມລະໄດ້ເດັດຂາດທັງກິເລດເຄື່ອງຮ້ອຍຮັດ ໂມຫະ ນິວອນ ການສັນຍາ ພະຍາບາດສັນຍາ ວິຫິງສາສັນຍາແລະທິດຖິສັນຍາ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ລວມຄວາມວ່າ ມຸນີຜູ້ເວັ້ນຈາກສັນຍາແລ້ວ ຍ່ອມບໍ່ມີກິເລດເຄື່ອງຮ້ອຍຮັດ

ຄຳວ່າ ມຸນີຜູ້ຫຼຸດພົ້ນດ້ວຍປັນຍາແລ້ວ ຍ່ອມບໍ່ມີຄວາມລຸ້ມຫຼົງ ອະທິບາຍວ່າ ຜູ້ໃດຈະເລີນອະຣິຍະມັກ ທີ່ມີວິປັດສະນາເປັນເບື້ອງຕົ້ນ ຜູ້ນັ້ນ ຍ່ອມຂົ່ມຄວາມລຸ້ມຫຼົງໄດ້ຕັ້ງແຕ່ຕົ້ນ ເມື່ອບັນລຸອະຣະຫັດຕະຜົນແລ້ວ ພຣະອະຣະຫັນຍ່ອມລະໄດ້ເດັດຂາດທັງໂມຫະ ກິເລດເຄື່ອງຮ້ອຍຮັດ ນິວອນ ການສັນຍາ ພະຍາບາດສັນຍາ ວິຫິງສາສັນຍາ ແລະທິດຖິສັນຍາ ຕັດຮາກ

ກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ລວມຄວາມວ່າ ມຸນີຜູ້ຫຼຸດພົ້ນດ້ວຍປັນຍາແລ້ວ ຍ່ອມບໍ່ມີຄວາມລຸ້ມຫຼົງ

ຄຳວ່າ ຊົນເຫຼົ່າໃດຍັງຖືສັນຍາແລະທິດຖິ ຊົນເຫຼົ່ານັ້ນຍ່ອມທ່ຽວກະທົບກະທັ່ງກັນໃນໂລກ ອະທິບາຍວ່າ ຊົນເຫຼົ່າໃດ ຖືສັນຍາ ຄື ກາມສັນຍາ ພະຍາບາດສັນຍາ ວິຫິງສາສັນຍາ ຊົນເຫຼົ່ານັ້ນ ຍ່ອມກະທົບກະທັ່ງກັນ ຄື ທຳຮ້າຍກັນ ດ້ວຍອຳນາດສັນຍາ ກ່າວຄື ພຣະຣາຊາຊົງວິວາທະກັບພຣະຣາຊາກໍໄດ້ ກະສັດວິວາທະກັບ ກະສັດກໍໄດ້ ພາມວິວາທະກັບພາມ ກໍໄດ້ ຄະຫະບໍດີວິວາທະກັບຄະຫະບໍດີກໍໄດ້ ມານດາວິວາທະກັບບຸດກໍໄດ້ ບຸດວິວາທະກັບມານດາກໍໄດ້ ບິດາວິວາທະກັບບຸດກໍໄດ້ ບຸດວິວາທະກັບບິດາກໍໄດ້ ອ້າຍນ້ອງຊາຍວິວາທະກັບອ້າຍນ້ອງຊາຍກໍໄດ້ ເອື້ອຍນ້ອງສາວວິວາທະກັບເອື້ອຍນ້ອງສາວກໍໄດ້ ອ້າຍນ້ອງຊາຍວິວາທະກັບເອື້ອຍນ້ອງສາວກໍໄດ້ ເອື້ອຍນ້ອງສາວວິວາທະກັບອ້າຍນ້ອງຊາຍກໍໄດ້ ສະຫາຍວິວາທະກັບສະຫາຍກໍໄດ້ ຊົນເຫຼົ່ານັ້ນ ກໍ່ການຜິດຖຽງ ກໍ່ການໝາງໃຈກັນ ກໍ່ການຍາດແຍ່ງ ແລະກໍ່ການວິວາດກັນ ກໍ່ການມຸ້ງຮ້າຍຍ້ອນສັນຍານັ້ນ

ກໍທຳຮ້າຍກັນດ້ວຍຝ່າມືແດ່ ດ້ວຍກ້ອນດິນແດ່ ດ້ວຍໄມ້ຄ້ອນແດ່ ດ້ວຍອາວຸດແດ່ ຍ້ອນທຳຮ້າຍກັນນັ້ນ ຊົນເຫຼົ່ານັ້ນກໍເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່ ຊົນເຫຼົ່າໃດ ຖືທິດຖິວ່າໂລກທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ຊົນເຫຼົ່ານັ້ນ ຍ່ອມກະທົບກະທັ່ງກັນ ຄື ທຳຮ້າຍກັນ ດ້ວຍອຳນາດທິດຖິໄດ້ແກ່ກະທົບກະທັ່ງ ຄື ທຳຮ້າຍສາດສະດາໂດຍສາດສະດາ ທຳທີ່ສາດສະດາກ່າວສອນໂດຍທຳທີ່ສາດສະດາກ່າວສອນ ໝູ່ຄະນະໂດຍໝູ່ຄະນະ ທິດຖິໂດຍທິດຖິ ປະຕິປະທາໂດຍປະຕິປະທາ ມັກ ໂດຍມັກ

ອີກໄນໜຶ່ງ ຊົນເຫຼົ່ານັ້ນ ຍ່ອມວິວາດກັນ ຄື ກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການຍາດແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍກັນວ່າ ທ່ານບໍ່ຮູ້ຈັກທຳວິໄນນີ້ ຯລຯ ຫຼື ຫາກທ່ານສາມາດກໍຈົ່ງແກ້ໄຂເທີ້ນ ຊົນເຫຼົ່ານັ້ນ ຍັງລະອະພິສັງຂານບໍ່ໄດ້ ຍ້ອນຍັງລະອະພິສັງຂານບໍ່ໄດ້ ຈຶ່ງກະທົບກັນໃນຄະຕິ ກະທົບກັນໃນນະຮົກ ກະທົບກັນໃນກຳເນີດເດຍຮັດສານ ກະທົບກັນໃນເຜດວິໄສ ກະທົບກັນໃນມະນຸດໂລກ ກະທົບກັນໃນເທວະໂລກ ກະທົບກັນ ຄື ທຳຮ້າຍຄະຕິດ້ວຍຄະຕິ ຯລຯ ການຖືກຳເນີດດ້ວຍການຖືກຳເນີດ ຯລຯ ປະຕິສົນທິດ້ວຍປະຕິສົນທິ ຯລຯ ພົບດ້ວຍພົບ ຯລຯ ສົງສານດ້ວຍສົງສານ ຯລຯ ວັດຕະດ້ວຍວັດຕະ ໄດ້ແກ່ ທ່ຽວໄປ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ກະທົບກັນ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ຊົນເຫຼົ່າໃດຍັງຖືສັນຍາແລະທິດຖິ ຊົນເຫຼົ່ານັ້ນຍ່ອມທ່ຽວກະທົບກະທັ່ງກັນໃນໂລກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີຜູ້ເວັ້ນຈາກສັນຍາແລ້ວ ຍ່ອມບໍ່ມີກິເລດເຄື່ອງຮ້ອຍຮັດ
ມຸນີຜູ້ຫຼຸດພົ້ນດ້ວຍປັນຍາແລ້ວ ຍ່ອມບໍ່ມີຄວາມລຸ້ມຫຼົງ
ຊົນເຫຼົ່າໃດຍັງຖືສັນຍາແລະທິດຖິ
ຊົນເຫຼົ່ານັ້ນຍ່ອມທ່ຽວກະທົບກັນໃນໂລກ

**ມາຄັນທິຍະສຸດຕະນິດເທດທີ ໙ ຈົບ**

# ໑໐. ປຸຣາເພທະສຸດຕະນິດເທດ

## ອະທິບາຍປຸຣາເພທະສູດ

### ວ່າດ້ວຍກ່ອນການດັບຂັນທະປະຣິນິບພານ

ພຣະສາຣີບຸດເຖຣະຈະກ່າວອະທິບາຍປຸຣາເພທະສູດ ດັ່ງຕໍ່ໄປນີ້

[໘໓] (ພຣະພຸດທະເນຣະມິດທູນຖາມວ່າ)

ບຸກຄົນມີທັດສະນະແນວໃດ ມີສີນແນວໃດ
ຈຶ່ງຮຽກວ່າ ເປັນຜູ້ສະຫງົບແລ້ວ
ຂ້າແດ່ ພຣະໂຄຕະມະ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງໂຜດຕັດບອກນໍຣະຊົນຜູ້ສູງສຸດນັ້ນແກ່ຂ້າພຣະອົງເທີ້ນ

### ວ່າດ້ວຍຄໍາຖາມຂອງພຣະພຸດທະເນຣະມິດ

ຄໍາວ່າ ມີທັດສະນະແນວໃດ ໃນຄໍາວ່າ ບຸກຄົນມີທັດສະນະແນວໃດ ມີສີນແນວໃດ ຈຶ່ງຮຽກວ່າ ເປັນຜູ້ສະຫງົບແລ້ວ ອະທິບາຍວ່າ ບຸກຄົນປະກອບດ້ວຍທັດສະນະແນວໃດ ຄື ມີຈຸດຢືນແນວໃດ ມີທ່າທີແນວໃດ ມີແນວທຽບແນວໃດ ລວມຄວາມວ່າ ມີທັດສະນະແນວໃດ

ຄໍາວ່າ ມີສີນແນວໃດ ອະທິບາຍວ່າ ບຸກຄົນປະກອບດ້ວຍສີນແນວໃດ ຄື ມີຈຸດຢືນແນວໃດ ມີທ່າທີແນວໃດ ມີແນວທຽບແນວໃດ ລວມຄວາມວ່າ ມີທັດສະນະແນວໃດ ມີສີນແນວໃດ

ຄໍາວ່າ ຈຶ່ງຮຽກວ່າ ເປັນຜູ້ສະຫງົບແລ້ວ ອະທິບາຍວ່າ ຈຶ່ງຕັດຮຽກ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງວ່າ ເປັນຜູ້ສະຫງົບແລ້ວ ຣະງັບແລ້ວ ເຢັນແລ້ວ ສະຫງັດແລ້ວ ພຣະພຸດທະເນ

ຣະມິດທູນຖາມເຖິງອະທິປັນຍາດ້ວຍຄຳວ່າ ມີທັດສະນະແນວໃດ ທູນຖາມເຖິງອະທິສີນດ້ວຍຄຳວ່າ ມີສີນແນວໃດ ທູນຖາມເຖິງອະທິຈິດດ້ວຍຄຳວ່າ ເປັນຜູ້ສະງົບແລ້ວ ລວມຄວາມວ່າ ບຸກຄົນມີທັດສະນະແນວໃດ ມີສີນແນວໃດ ຈຶ່ງຮຽກວ່າ ເປັນຜູ້ສະງົບແລ້ວ

ຄຳວ່າ ນໍຣະຊົນນັ້ນ ໃນຄຳວ່າ ຂ້າແດ່ພຣະໂຄຕະມະ ຂໍພຣະອົງໂຜດຕັດບອກ ນໍຣະຊົນ ໆລໆ ນັ້ນ ແກ່ຂ້າພຣະອົງເທີ້ນ ອະທິບາຍວ່າ ຂ້າພຣະອົງທູນຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດ ນໍຣະຊົນໃດ ພຣະພຸດທະເນຣະມິດຮຽກພຣະຜູ້ມີພຣະພາກພຸດທະເຈົ້າໂດຍ ພຣະໂຄດວ່າ ພຣະໂຄຕະມະ

ຄຳວ່າ ໂຜດຕັດບອກ ອະທິບາຍວ່າ ໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ຊົງປະກາດ ລວມຄວາມວ່າ ຂ້າແດ່ພຣະໂຄຕະມະ ຂໍພຣະອົງໂຜດຕັດບອກນໍຣະຊົນ ໆລໆ ນັ້ນ ແກ່ຂ້າພຣະອົງເທີ້ນ

ຄຳວ່າ ທູນຖາມແລ້ວ ໃນຄຳວ່າ ຂ້າພຣະອົງທູນຖາມແລ້ວ ໆລໆ ນໍຣະຊົນຜູ້ສູງສຸດ ອະທິບາຍວ່າ ຂ້າພຣະອົງທູນສອບຖາມ ທູນຖາມແລ້ວ ທູນຂໍແລ້ວ ທູນອັນເຊີນແລ້ວ ທູນໃຫ້ຊົງປະກາດແລ້ວ

ຄຳວ່າ ນໍຣະຊົນຜູ້ສູງສຸດ ອະທິບາຍວ່າ ນໍຣະຊົນຜູ້ຍອດຢ້ຽມ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ ລວມຄວາມວ່າ ຂ້າພຣະອົງທູນຖາມແລ້ວ ໆລໆ ນໍຣະຊົນຜູ້ສູງສຸດ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດນັ້ນຈຶ່ງທູນຖາມວ່າ

> ບຸກຄົນມີທັດສະນະແນວໃດ ມີສີນແນວໃດ
> ຈຶ່ງຮຽກວ່າ ເປັນຜູ້ສະງົບແລ້ວ
> ຂ້າແດ່ ພຣະໂຄຕະມະ ຂ້າພຣະອົງທູນຖາມແລ້ວ
> ຂໍພຣະອົງໂຜດຕັດບອກນໍຣະຊົນຜູ້ສູງສຸດນັ້ນແກ່ຂ້າພຣະອົງເທີ້ນ

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

> ກ່ອນດັບຂັນທະປະຣິນິບພານ ພຣະອະຣະຫັນເປັນຜູ້ຄາຍຕັນຫາ
> ບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ
> ໃຜ ໆ ກຳນົດບໍ່ໄດ້ໃນສ່ວນທ່າມກາງ
> ພຣະອະຣະຫັນນັ້ນບໍ່ໄດ້ມຸ້ງຫວັງເຖິງຕັນຫາແລະທິດຖິ (ໃນສ່ວນເບື້ອງປາຍ)

## ອະທິບາຍຄຳວ່າ ພະຄະວາ

ຄຳວ່າ ກ່ອນດັບຂັນທະປະຣິນິບພານ ພຣະອະຣະຫັນເປັນຜູ້ຄາຍຕັນຫາ ອະທິບາຍວ່າ ກ່ອນກາຍແຕກ ກ່ອນອັດຕະພາບແຕກ ກ່ອນການຖິ້ມຊາກສົບ ກ່ອນການຂາດຊີວິຕິນຊີ ພຣະ

ອະຣະຫັນເປັນຜູ້ຄາຍຕັນຫາແລ້ວ ຄື ປາສະຈາກຕັນຫາແລ້ວ ສະລະຕັນຫາໄດ້ແລ້ວ ຄາຍຕັນຫາໄດ້ແລ້ວ ປ່ອຍຕັນຫາໄດ້ແລ້ວ ລະຕັນຫາໄດ້ແລ້ວ ສະລັດຖິ້ມຕັນຫາໄດ້ແລ້ວ ຄື ເປັນຜູ້ຄາຍຄວາມກຳໜັດແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະໄດ້ແລ້ວ ຄາຍຣາຄະໄດ້ແລ້ວ ປ່ອຍຣາຄະໄດ້ແລ້ວ ລະຣາຄະໄດ້ແລ້ວ ສະລັດຖິ້ມຣາຄະໄດ້ແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ເປັນຜູ້ດັບແລ້ວ ເປັນຜູ້ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ
ອີກໄນໜຶ່ງ ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍຣາຄະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂທສະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂມຫະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍມານະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍທິດຖິໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍສັງບໜາມໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍກິເລດໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງຈຳແນກ ແຍກແຍະ ແຈກແຈງທຳຣັດຕະນະ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງເຮັດບ່ອນສຸດແຫ່ງພົບໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມພຣະວໍຣະກາຍແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມສີນ ອົບຮົມຈິດ ອົບຮົມປັນຍາແລ້ວ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ສອຍເສນາສະນະທີ່ເປັນປ່າເລິ່າແລະປ່າທຶບອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມີສ່ວນແຫ່ງຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງອັດຖະຣົດ ທຳມະຣົດ ວິມຸດຕິຣົດ ອະທິສີນ ອະທິຈິດ ອະທິປັນຍາ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຊານ ໔ ອັບປະມັນຍາ ໔ ອະຮູບສະມາບັດ ໔ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງວິໂມກ ໗ ອະພິພາຍະຕະນະ ໗ ອະນຸປຸບພະວິຫາຣະສະມາບັດ ໙ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສັນຍາພາວະນາ ໑໐ ກະສິນສະມາບັດ ໑໐ ອານາປານະສະຕິສະມາທິ ອະສຸພະສະມາບັດ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຕະຖາຄົດພະລະຍານ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ພະນາມວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງ ບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດແລະອຳມາດຕັ້ງ ບໍ່ແມ່ນພຣະຍາດ ແລະຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນວິໂມກຂັນຕິກະນາມ ເປັນສັດສິກາບັນຍັດຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ພ້ອມກັບການບັນລຸພຣະສັພພັນຍຸຕະຍານທີ່ເຫງົ້າ ຕົ້ນໂພ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້ ກ່ອນດັບຂັນທະປະຣິນິບພານ ພຣະອະຣະຫັນເປັນຜູ້ຄາຍຕັນຫາ

ຄຳວ່າ ບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ ອະທິບາຍວ່າ ອະດີດຕະການ ຕັດຮຽກວ່າ ສ່ວນເບື້ອງຕົ້ນ ພຣະອະຣະຫັນຜາລົບອະດີດຕະການ ລະຕັນຫາໄດ້ແລ້ວ ສະລັດຖິ້ມທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຕັນຫາ ສະລັດຖິ້ມທິດຖິໄດ້ແລ້ວ ພຣະອະຣະຫັນຈຶ່ງຊື່ວ່າ ບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ ແນວນີ້ແດ່

ອີກໄນໜຶ່ງ ພຣະອະຣະຫັນຍ່ອມບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ ໃນອະດີດຕະການ ເຮົາໄດ້ມີຮູບແນວນີ້ ໆລໆ ມີເວທະນາແນວນີ້ ໆລໆ ມີສັນຍາແນວນີ້ ໆລໆ ມີສັງ ຂານແນວນີ້ ໆລໆ ພຣະອະຣະຫັນຍ່ອມບໍ່ດຳເນີນໄປຕາມຄວາມເພີດເພີນທີ່ມີຢູ່ກ່ອນນັ້ນວ່າ ໃນອະດີດຕະການ ເຮົາໄດ້ມີວິນຍານແນວນີ້ ພຣະອະຣະຫັນຈຶ່ງຊື່ວ່າບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນແນວນີ້ແດ່

ອີກໄນໜຶ່ງ ພຣະອະຣະຫັນຍ່ອມບໍ່ມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະທີ່ມີຢູ່ກ່ອນນັ້ນວ່າ ໃນອະດີດຕະການ ເຮົາໄດ້ມີຕາເຊັ່ນນີ້ ເຫັນຮູບເຊັ່ນນີ້ ຈຶ່ງບໍ່ເພີດເພີນຕາແລະຮູບນັ້ນ ຍ້ອນເປັນຜູ້ບໍ່ມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະ ພຣະອະຣະຫັນ ຈຶ່ງຊື່ວ່າບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ ຍ້ອນບໍ່ໃຍດີໃນຕາແລະຮູບນັ້ນ ແນວນີ້ແດ່

ພຣະອະຣະຫັນບໍ່ມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະທີ່ມີຢູ່ກ່ອນນັ້ນວ່າ ໃນອະດີດຕະການ ເຮົາໄດ້ມີຫູເຊັ່ນນີ້ ໄດ້ຍິນສຽງເຊັ່ນນີ້ ຯລຯ ເຮົາໄດ້ມີດັງເຊັ່ນນີ້ ໄດ້ກິ່ນເຊັ່ນນີ້ ຯລຯ ເຮົາໄດ້ມີລີ້ນເຊັ່ນນີ້ ຮູ້ຣົດເຊັ່ນນີ້ ຯລຯ ເຮົາໄດ້ມີກາຍເຊັ່ນນີ້ ສຳຜັດກັບໂຜດຖັບພະເຊັ່ນນີ້ ຯລຯ ພຣະອະຣະຫັນຍ່ອມບໍ່ມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະທີ່ມີຢູ່ກ່ອນນັ້ນວ່າ ໃນອະດີດຕະການ ເຮົາໄດ້ມີໃຈເຊັ່ນນີ້ ຮູ້ທຳມາຣົມເຊັ່ນນີ້ ຈຶ່ງບໍ່ເພີດເພີນອາຍະຕະນະພາຍໃນ ແລະອາຍະຕະນະພາຍນອກນັ້ນ ຍ້ອນບໍ່ມີວິນຍານກ່ຽວເນື່ອງດ້ວຍສັນທະຣາຄະ ພຣະອະຣະຫັນ ຈຶ່ງຊື່ວ່າບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ ຍ້ອນບໍ່ໃຍດີໃນໃຈແລະທຳມາຣົມນັ້ນແນວນີ້ແດ່

ອີກໄນໜຶ່ງ ພຣະອະຣະຫັນຍ່ອມບໍ່ຊື່ນໃຈ ບໍ່ໃຍດີ ບໍ່ເຖິງຄວາມຍິນດີໃຈ ດ້ວຍການຫົວ ການເວົ້າຈາ ການປາໄສ ແລະການຫຼິ້ນຫົວກັບມາຕຸຄາມ ໃນຄັ້ງກ່ອນ ແມ່ນດ້ວຍປະການແນວນີ້ ພຣະອະຣະຫັນຈຶ່ງຊື່ວ່າບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ

ຄຳວ່າ ໃຜ ໆ ກຳນົດບໍ່ໄດ້ໃນສ່ວນທ່າມກາງ ອະທິບາຍວ່າ ປັດຈຸບັນການ ຕັດຮຽກວ່າສ່ວນທ່າມກາງ ພຣະອະຣະຫັນຜາລົບປັດຈຸບັນການ ລະຕັນຫາໄດ້ແລ້ວ ສະລັດຖິ້ມທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຕັນຫາ ສະລັດຖິ້ມທິດຖິໄດ້ແລ້ວ ໃຜ ໆ ຈຶ່ງກຳນົດບໍ່ໄດ້ວ່າ ເປັນຜູ້ກຳໜັດ ເປັນຜູ້ຂັດເຄືອງ ເປັນຜູ້ຫຼົງ ເປັນຜູ້ຍຶດຕິດ ເປັນຜູ້ຍຶດໝັ້ນ ເປັນຜູ້ຟຸ້ງຊ່ານ ເປັນຜູ້ລັງເລ ເປັນຜູ້ຕົກຢູ່ໃນກຳລັງກິເລດ

ພຣະອະຣະຫັນລະອະພິສັງຂານເຫຼົ່ານັ້ນໄດ້ແລ້ວ ຍ້ອນເປັນຜູ້ລະອະພິສັງຂານໄດ້ແລ້ວ ໃຜ ໆ ຈຶ່ງກຳນົດບໍ່ໄດ້ໂດຍຄະຕິວ່າ ເປັນຜູ້ເກີດໃນນະຮົກ ເປັນຜູ້ເກີດໃນກຳເນີດເດຍຣັດສານ ເປັນຜູ້ເກີດໃນເຜດວິໄສ ເປັນມະນຸດ ເປັນເທວະດາ ເປັນຜູ້ມີຮູບ ເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼື ເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ພຣະອະຣະຫັນນັ້ນຈະເພິ່ງກຳນົດດ້ວຍເຫດ ປັດໄຈ ແລະການໃດ ເຫດປັດໄຈ ແລະການນັ້ນບໍ່ມີ ລວມຄວາມວ່າ ໃຜ ໆ ກຳນົດບໍ່ໄດ້ໃນສ່ວນທ່າມກາງ

## ວ່າດ້ວຍຄວາມມຸ້ງຫວັງ ໒ ຢ່າງ

ຄຳວ່າ ນັ້ນ ໃນຄຳວ່າ ພຣະອະຣະຫັນນັ້ນບໍ່ໄດ້ມຸ້ງຫວັງຕັນຫາແລະທິດຖິ (ໃນສ່ວນເບື້ອງປາຍ) ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ຄວາມມຸ້ງຫວັງຕັນຫາແລະທິດຖິ (ໃນສ່ວນເບື້ອງປາຍ) ໄດ້ແກ່ ຄວາມມຸ້ງຫວັງໃນສ່ວນເບື້ອງປາຍ ໒ ຢ່າງ ຄື (໑) ຄວາມມຸ້ງຫວັງດ້ວຍອຳນາດຕັນຫາໃນສ່ວນເບື້ອງປາຍ (໒) ຄວາມມຸ້ງຫວັງດ້ວຍອຳນາດທິດຖິໃນສ່ວນເບື້ອງປາຍ ຯລຯ ນີ້ຊື່ວ່າຄວາມມຸ້ງຫວັງດ້ວຍອຳນາດຕັນຫາໃນສ່ວນເບື້ອງປາຍ ຯລຯ ນີ້ຊື່ວ່າຄວາມມຸ້ງຫວັງດ້ວຍອຳນາດທິດຖິໃນສ່ວນເບື້ອງປາຍ

ພຣະອະຣະຫັນນັ້ນລະຄວາມມຸ້ງຫວັງ ດ້ວຍອຳນາດຕັນຫາໃນສ່ວນເບື້ອງປາຍໄດ້ແລ້ວ ສະລັດຖິ້ມຄວາມມຸ້ງຫວັງດ້ວຍອຳນາດທິດຖິໃນສ່ວນເບື້ອງປາຍໄດ້ແລ້ວ ຍ້ອນເປັນຜູ້ລະຄວາມ

ມຸ້ງຫວັງດ້ວຍອຳນາດຕັນຫາໃນສ່ວນເບື້ອງປາຍ ສະລັດຖິ້ມຄວາມມຸ້ງຫວັງດ້ວຍອຳນາດທິດຖິໃນສ່ວນເບື້ອງປາຍໄດ້ແລ້ວ ພຣະອະຣະຫັນຈຶ່ງບໍ່ຫ່ຽວມຸ້ງຫວັງຕັນຫາຫຼືທິດຖິ ຄື ບໍ່ມີຕັນຫາເປັນທຸງໄຊ ບໍ່ມີຕັນຫາເປັນຍອດທຸງ ບໍ່ມີຕັນຫາເປັນໃຫຍ່ ບໍ່ມີທິດຖິເປັນທຸງໄຊ ບໍ່ມີທິດຖິເປັນຍອດທຸງ ບໍ່ມີທິດຖິເປັນໃຫຍ່ ບໍ່ຖືກຕັນຫາ ຫຼື ທິດຖິຄອບງຳຫ່ຽວໄປ ລວມຄວາມວ່າ ພຣະອະຣະຫັນນັ້ນ ບໍ່ໄດ້ມຸ້ງຫວັງຕັນຫາແລະທິດຖິ (ໃນສ່ວນເບື້ອງປາຍ)

ອີກໄນໜຶ່ງ ພຣະອະຣະຫັນຍ່ອມບໍ່ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າ ໃນອະນາຄົດການ ເຮົາເພິ່ງມີຮູບແບວນີ້ ໆລໆ ມີເວທະນາແບວນີ້ ໆລໆ ມີສັນຍາແບວນີ້ ໆລໆ ມີສັງ ຂານແບວນີ້ ໆລໆ ພຣະອະຣະຫັນຍ່ອມບໍ່ດຳເນີນໄປຕາມຄວາມເພີດເພີນໃນປັນຈະຂັນວ່າໃນອະນາຄົດການ ເຮົາເພິ່ງມີວິນຍານແບວນີ້ ພຣະອະຣະຫັນນັ້ນຈຶ່ງຊື່ວ່າ ບໍ່ມີຄວາມມຸ້ງຫວັງປັນຈະຂັນໃນອະນາຄົດການ ແບວນີ້ແດ່

ອີກໄນໜຶ່ງ ພຣະອະຣະຫັນຍ່ອມບໍ່ຕັ້ງໃຈເພື່ອໃຫ້ໄດ້ຕາ ແລະຮູບທີ່ຍັງບໍ່ໄດ້ວ່າ ໃນອະນາຄົດການ ເຮົາເພິ່ງມີຕາເຊັ່ນນີ້ ເຫັນຮູບເຊັ່ນນີ້ ຍ້ອນບໍ່ມີຄວາມຕັ້ງໃຈເຊັ່ນນັ້ນເປັນປັດໄຈ ພຣະອະຣະຫັນຈຶ່ງບໍ່ເພີດເພີນຕາແລະຮູບນັ້ນ ເມື່ອບໍ່ເພີດເພີນຕາແລະຮູບນັ້ນ ພຣະອະຣະຫັນນັ້ນຈຶ່ງບໍ່ມີຄວາມມຸ້ງຫວັງໃນອະນາຄົດການ ແບວນີ້ແດ່

ພຣະອະຣະຫັນຍ່ອມບໍ່ຕັ້ງໃຈເພື່ອໃຫ້ໄດ້ຫູ ແລະສຽງທີ່ຍັງບໍ່ໄດ້ວ່າ ໃນອະນາຄົດການ ເຮົາເພິ່ງມີຫູເຊັ່ນນີ້ ໄດ້ຍິນສຽງເຊັ່ນນີ້ ໆລໆ ໃນອະນາຄົດການ ເຮົາເພິ່ງມີດັງເຊັ່ນນີ້ ໄດ້ກິ່ນເຊັ່ນນີ້ ໆລໆ ໃນອະນາຄົດການ ເຮົາເພິ່ງມີລີ້ນເຊັ່ນນີ້ ຮູ້ຣົດເຊັ່ນນີ້ ໆລໆ ໃນອະນາຄົດການ ເຮົາເພິ່ງມີກາຍເຊັ່ນນີ້ ສຳຜັດໂຜດຖັບພະເຊັ່ນນີ້ ໆລໆ ບໍ່ຕັ້ງໃຈເພື່ອໃຫ້ໄດ້ໃຈແລະທຳມາຣົມທີ່ຍັງບໍ່ໄດ້ວ່າ ໃນອະນາຄົດການ ເຮົາເພິ່ງມີໃຈເຊັ່ນນີ້ ຮູ້ທຳມາຣົມເຊັ່ນນີ້ ຍ້ອນບໍ່ມີຄວາມຕັ້ງໃຈເຊັ່ນນັ້ນເປັນປັດໄຈ ພຣະອະຣະຫັນຈຶ່ງບໍ່ເພີດເພີນໃຈແລະທຳມາຣົມນັ້ນ ເມື່ອບໍ່ເພີດເພີນໃຈ ແລະ ທຳມາຣົມນັ້ນ ພຣະອະຣະຫັນນັ້ນຈຶ່ງບໍ່ມີຄວາມມຸ້ງຫວັງໃນອະນາຄົດການ ແບວນີ້ແດ່

ອີກໄນໜຶ່ງ ພຣະອະຣະຫັນຍ່ອມບໍ່ຕັ້ງໃຈເພື່ອໃຫ້ໄດ້ພົບທີ່ຍັງບໍ່ໄດ້ວ່າ ເຮົາຈັກເປັນ ເທບພະເຈົ້າ ຫຼື ເທວະດາຕົນໃດຕົນໜຶ່ງດ້ວຍສິນ ຂໍ້ວັດ ຕະບະ ຫຼື ພົມມະຈັນນີ້ ຍ້ອນການບໍ່ຕັ້ງໃຈເຊັ່ນນັ້ນເປັນປັດໄຈ ພຣະອະຣະຫັນຈຶ່ງບໍ່ເພີດເພີນພົບນັ້ນ ເມື່ອບໍ່ເພີດເພີນພົບນັ້ນ ພຣະອະຣະຫັນຈຶ່ງບໍ່ມີຄວາມມຸ້ງຫວັງໃນອະນາຄົດການ ແບວນີ້ແດ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ (ພຣະຜູ້ມີພຣະພາກເຈົ້າຕັດຕອບດັ່ງນີ້)

ກ່ອນດັບຂັນທະປະຣິນິບພານ ພຣະອະຣະຫັນເປັນຜູ້ຄາຍຕັນຫາ
ບໍ່ຕິດຢູ່ກັບຄວາມເພີດເພີນທີ່ມີຢູ່ໃນສ່ວນເບື້ອງຕົ້ນ
ໃຜ ໆ ກຳນົດບໍ່ໄດ້ໃນສ່ວນທ່າມກາງ
ພຣະອະຣະຫັນນັ້ນບໍ່ໄດ້ມຸ້ງຫວັງເຖິງຕັນຫາແລະທິດຖິ (ໃນສ່ວນເບື້ອງປາຍ)

[໗໕] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ບຸກຄົນຜູ້ບໍ່ໂກດ ບໍ່ສະດຸ້ງ ບໍ່ໂອ້ອວດ
ບໍ່ຄະນອງ ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ
ເປັນຜູ້ສັງລວມວາຈາ ນັ້ນແລ ຊື່ວ່າເປັນມຸນີ

## ວ່າດ້ວຍເຫດເກີດຄວາມໂກດ ໑໐ ຢ່າງ

ຄຳວ່າ ຜູ້ບໍ່ໂກດ ໃນຄຳວ່າ ຜູ້ບໍ່ໂກດ ບໍ່ສະດຸ້ງ ກ່າວໄວ້ແລ້ວຂ້າງຕົ້ນ ອັນໜຶ່ງ ຄວນກ່າວເຖິງຄວາມໂກດກ່ອນ ຄວາມໂກດ ຍ່ອມເກີດໄດ້ຍ້ອນເຫດ ໑໐ ຢ່າງ ຄື

໑. ຍ້ອນສຳຄັນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໒. ຍ້ອນສຳຄັນວ່າ ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໓. ຍ້ອນສຳຄັນວ່າ ຜູ້ນີ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໔. ຯລຯ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ມັກຂອງເຮົາ
໕. ຯລຯ ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ມັກຂອງເຮົາ
໖. ຯລຯ ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ມັກຂອງເຮົາ
໗. ຯລຯ ຜູ້ນີ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ບໍ່ມັກຂອງເຮົາ
໘. ຯລຯ ຜູ້ນີ້ກຳລັງເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ບໍ່ມັກຂອງເຮົາ
໙. ຯລຯ ຜູ້ນີ້ຈັກເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ບໍ່ມັກຂອງເຮົາ
໑໐. ຄວາມໂກດເກີດຂຶ້ນໃນຖານະອັນບໍ່ສົມຄວນ

ໃຈປອງຮ້າຍ ມຸ້ງຮ້າຍ ຂັດເຄືອງ ຂຸ່ນເຄືອງ ເຄືອງ ເຄືອງຫຼາຍ ເຄືອງຕະຫຼອດ ຊັງ ຊິງຊັງ ກຽດຊັງ ໃຈພະຍາບາດ ໃຈແຄ້ນເຄືອງ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມໂກດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດເຫັນປານນີ້ ນີ້ຕັດຮຽກວ່າ ຄວາມໂກດ

ອີກໄນໜຶ່ງ ເພິ່ງຮູ້ຄວາມໂກດຫຼາຍ ຄວາມໂກດໜ້ອຍ ບາງເທື່ອຄວາມໂກດ ພຽງເຮັດໃຫ້ໃຈຂຸ່ນມົວ ຍັງບໍ່ເຖິງກັບໜ້າເງົ້າໜ້າງໍກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ໜ້າເງົ້າໜ້າງໍ ແຕ່ຍັງບໍ່ເຖິງກັບຄາງສັ່ນກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ຄາງສັ່ນ ແຕ່ຍັງບໍ່ເຖິງກັບເວົ້າຄຳຫຍາບກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ເວົ້າຄຳຫຍາບ ແຕ່ຍັງບໍ່ເຖິງກັບຕາຂວາງແນມຊ້າຍແນມຂວາກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ຕາຂວາງແນມຊ້າຍແນມຂວາ ແຕ່ຍັງບໍ່ເຖິງກັບຈັບໄມ້ຈັບມີດກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ຈັບໄມ້ຈັບມີດ ແຕ່ຍັງບໍ່ເຖິງກັບຍົກງ້າງໄມ້

ແລະມີດຂຶ້ນກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ຍົກງ້າງໄມ້ແລະມີດຂຶ້ນ ແຕ່ຍັງບໍ່ເຖິງກັບລົງມືຟາດຟັນກໍມີ ບາງເທື່ອຄວາມໂກດພຽງແຕ່ຟາດຟັນ ແຕ່ຍັງບໍ່ເຖິງກັບເຮັດໃຫ້ເກີດບາດແຜກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ເກີດບາດແຜ ແຕ່ຍັງບໍ່ເຖິງກັບເຮັດໃຫ້ກະດູກຫັກກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ກະດູກຫັກ ແຕ່ຍັງບໍ່ເຖິງກັບເຮັດໃຫ້ອະໄວຍະວະຂາດຫຼຸດໄປກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ອະໄວຍະວະຂາດຫຼຸດໄປ ແຕ່ຍັງບໍ່ເຖິງກັບເຮັດໃຫ້ເສຍຊີວິດກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ຜູ້ອື່ນເສຍຊີວິດ ແຕ່ຍັງບໍ່ເຖິງກັບເຮັດໃຫ້ດຳຣົງຢູ່ເພື່ອຂ້າຕົນເອງກໍມີ ເມື່ອໃດ ຄວາມໂກດເຮັດໃຫ້ຂ້າບຸກຄົນອື່ນແລ້ວຂ້າຕົນເອງນຳດ້ວຍ ເມື່ອນັ້ນຄວາມໂກດນັ້ນຖືວ່າເປັນໄປຢ່າງຮຸນແຮງ ເຖິງຄວາມເປັນສິ່ງຮ້າຍແຮງຢ່າງຍິ່ງ ຄວາມໂກດນັ້ນຜູ້ໃດ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ບໍ່ໂກດ ບຸກຄົນຊື່ວ່າຜູ້ບໍ່ໂກດ ຍ້ອນລະຄວາມໂກດໄດ້ແລ້ວ ບຸກຄົນ ຊື່ວ່າຜູ້ບໍ່ໂກດ ຍ້ອນກຳນົດຮູ້ວັດຖຸແຫ່ງຄວາມໂກດໄດ້ແລ້ວ ບຸກຄົນຊື່ວ່າຜູ້ບໍ່ໂກດ ຍ້ອນຕັດເຫດແຫ່ງຄວາມໂກດໄດ້ແລ້ວ ລວມຄວາມວ່າ ຜູ້ບໍ່ໂກດ

## ວ່າດ້ວຍຜູ້ບໍ່ສະດຸ້ງ

ຄຳວ່າ ບໍ່ສະດຸ້ງ ອະທິບາຍວ່າ ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ສະດຸ້ງ ຫວາດສຽວຫວັ່ນຫວາດ ທ່ານຍ່ອມສະດຸ້ງ ຫວາດສຽວ ຫວັ່ນຫວາດ ຢ້ານ ເຖິງຄວາມສະດຸ້ງວ່າ ເຮົາບໍ່ໄດ້ຕະກູນ ບໍ່ໄດ້ໝູ່ຄະນະ ບໍ່ໄດ້ອາວາດ ບໍ່ໄດ້ລາບ ບໍ່ໄດ້ຍົດ ບໍ່ໄດ້ສັນເສີນ ບໍ່ໄດ້ສຸກ ບໍ່ໄດ້ ຈີວອນບໍ່ໄດ້ບິນທະບາດ ບໍ່ໄດ້ເສນາສະນະ ບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານ ຫຼື ບໍ່ໄດ້ ຜູ້ປິ່ນປົວເວລາເຈັບປ່ວຍ ຍ່ອມສະດຸ້ງ ຫວາດສຽວ ຫວັ່ນຫວາດ ຢ້ານ ເຖິງຄວາມສະດຸ້ງວ່າ ເຮົາເປັນຜູ້ບໍ່ມີຊື່ສຽງຜາກົດ

ພິກຂຸໃນທຳວິໄນນີ້ ເປັນຜູ້ບໍ່ສະດຸ້ງ ບໍ່ຫວາດສຽວ ບໍ່ຫວັ່ນຫວາດ ທ່ານຍ່ອມບໍ່ສະດຸ້ງ ບໍ່ຫວາດສຽວ ບໍ່ຫວັ່ນຫວາດ ບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງວ່າ ເຮົາບໍ່ໄດ້ຕະກູນ ບໍ່ໄດ້ໝູ່ຄະນະ ບໍ່ໄດ້ອາວາດ ບໍ່ໄດ້ລາບ ບໍ່ໄດ້ຍົດ ບໍ່ໄດ້ສັນເສີນ ບໍ່ໄດ້ສຸກ ບໍ່ໄດ້ຈີວອນ ບໍ່ໄດ້ບິນທະບາດ ບໍ່ໄດ້ເສນາສະນະ ບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານ ຫຼື ບໍ່ໄດ້ຜູ້ປິ່ນປົວເວລາເຈັບປ່ວຍ ຍ່ອມບໍ່ສະດຸ້ງ ບໍ່ຫວາດສຽວ ບໍ່ຫວັ່ນຫວາດ ບໍ່ຢ້ານ ບໍ່ເຖິງຄວາມສະດຸ້ງວ່າ ເຮົາເປັນຜູ້ບໍ່ມີຊື່ສຽງຜາກົດ ລວມຄວາມວ່າ ຜູ້ບໍ່ໂກດ ບໍ່ສະດຸ້ງ

## ວ່າດ້ວຍຜູ້ບໍ່ໂອ້ອວດ

ຄຳວ່າ ບໍ່ໂອ້ອວດ ບໍ່ຄະນອງ ອະທິບາຍວ່າ ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ອວດເປັນຜູ້ໂອ້ອວດ ທ່ານຍ່ອມອວດ ໂອ້ອວດວ່າ ເຮົາເປັນຜູ້ສົມບູນດ້ວຍສີນແດ່ ສົມບູນດ້ວຍ ຂໍ້ວັດແດ່ ສົມບູນດ້ວຍສີນຂໍ້ວັດແດ່ ສົມບູນດ້ວຍຊາດແດ່ ສົມບູນດ້ວຍໂຄດແດ່ ສົມບູນດ້ວຍຄວາມ

ເປັນບຸດຂອງຜູ້ມີຕະກູນແດ່ ສົມບູນດ້ວຍຄວາມເປັນຜູ້ມີຮູບງາມແດ່ ສົມບູນດ້ວຍຊັບແດ່ ສົມບູນດ້ວຍການສຶກສາແດ່ ສົມບູນດ້ວຍໜ້າທີ່ວຽກງານແດ່ ສົມບູນດ້ວຍຫຼັກແຫ່ງສິລະປະວິທະຍາແດ່ ສົມບູນດ້ວຍວິທະຍະຖານະແດ່ ສົມບູນດ້ວຍຄວາມເປັນຜູ້ຄົງແກ່ຮຽນແດ່ ສົມບູນດ້ວຍປະຕິພານແດ່ ສົມບູນດ້ວຍສິ່ງອື່ນນອກຈາກທີ່ກ່າວມາແລ້ວແດ່ ອອກບວດຈາກຕະກູນສູງແດ່ ອອກບວດຈາກຕະກູນໃຫຍ່ແດ່ ອອກບວດຈາກຕະກູນມີຊັບຫຼາຍແດ່ ອອກບວດຈາກຕະກູນມີໂພຄະສົມບັດຫຼາຍແດ່ ເປັນຜູ້ມີຊື່ສຽງ ມີຍົດກວ່າຄະລິຫັດແລະບັນພະຊິດທັງຫຼາຍແດ່ ເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານແດ່ ເປັນຜູ້ຊົງຈຳພຣະສູດແດ່ ຊົງຈຳພຣະວິໄນແດ່ ເປັນພຣະທຳມະກະຖຶກແດ່ ເປັນຜູ້ຖືການຢູ່ປ່າເປັນຂໍ້ວັດແດ່ ເປັນຜູ້ຖືບິນທະບາດເປັນຂໍ້ວັດແດ່ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດແດ່ ເປັນຜູ້ຊົງໄຕຣ ຈີວອນເປັນຂໍ້ວັດແດ່ ເປັນຜູ້ທ່ຽວບິນທະບາດໄປຕາມລຳດັບຮ່ອມເປັນຂໍ້ວັດແດ່ ເປັນຜູ້ງົດອາຫານຄາບຫຼັງເປັນຂໍ້ວັດແດ່ ເປັນຜູ້ຖືການນັ່ງເປັນຂໍ້ວັດແດ່ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດແດ່ ເປັນຜູ້ໄດ້ປະຖົມຊານແດ່ ເປັນຜູ້ໄດ້ທຸຕິຍະຊານແດ່ ເປັນຜູ້ໄດ້ຕະຕິຍະຊານແດ່ ເປັນຜູ້ໄດ້ຈະຕຸດຖະຊານແດ່ ເປັນຜູ້ໄດ້ອາກາສານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ວິນຍານັນຈາຍະຕະນະສະມາບັດແດ່ ເປັນຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດແດ່ ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແດ່ ພິກຂຸນີ້ຍ່ອມບໍ່ອວດ ບໍ່ໂອ້ອວດ ແນວນີ້ ຄື ເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວກັບຄວາມອວດ ຄວາມໂອ້ອວດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ຜູ້ບໍ່ໂອ້ອວດ

## ວ່າດ້ວຍຜູ້ບໍ່ຄະນອງ

ຄຳວ່າ ຄວາມຄະນອງ ໃນຄຳວ່າ ຜູ້ບໍ່ຄະນອງ ອະທິບາຍວ່າ ຄວາມຄະນອງມື ຊື່ວ່າຄວາມຄະນອງ ຄວາມຄະນອງຕີນ ຊື່ວ່າຄວາມຄະນອງ ຄວາມຄະນອງມືແລະຕີນ ກໍຊື່ວ່າຄວາມຄະນອງ ຄວາມສຳຄັນໃນສິ່ງບໍ່ຄວນວ່າຄວນ ຄວາມສຳຄັນໃນສິ່ງທີ່ຄວນວ່າ ບໍ່ຄວນ ຄວາມສຳຄັນໃນວິການວ່າເປັນການ ຄວາມສຳຄັນໃນການວ່າເປັນວິການ ຄວາມສຳຄັນໃນສິ່ງທີ່ບໍ່ມີໂທດວ່າມີໂທດ ຄວາມສຳຄັນໃນສິ່ງທີ່ມີໂທດວ່າບໍ່ມີໂທດ ຄວາມຄະນອງ ກິຣິຍາທີ່ ຄະນອງ ພາວະທີ່ຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຄະນອງ

ອີກໄນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຫດ ໒ ຢ່າງ ຄື (໑) ຍ້ອນເຮັດ (໒) ຍ້ອນບໍ່ເຮັດ

ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຮັດແລະຍ້ອນບໍ່ເຮັດເປັນແນວໃດ?

ຄື ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາເຮັດແຕ່ ກາຍທຸດຈະຣິດ ບໍ່ເຮັດກາຍສຸດຈະຣິດ ຯລຯ ເຮົາເຮັດແຕ່ວະຈີທຸດຈະຣິດ ບໍ່ເຮັດວະຈີສຸດຈະຣິດ

ຯລຯ ເຮົາເຮັດແຕ່ມະໂນທຸດຈະຣິດ ບໍ່ເຮັດມະໂນສຸດຈະຣິດ ຯລຯ ເຮົາເຮັດແຕ່ປານາຕິບາດ ບໍ່ເຮັດຄວາມງົດເວັ້ນຈາກປານາຕິບາດ ຯລຯ ເຮົາເຮັດແຕ່ອະທິນນາທານ ບໍ່ເຮັດຄວາມງົດເວັ້ນຈາກອະທິນນາທານ ຯລຯ ເຮົາເຮັດແຕ່ກາເມສຸມິດສາຈານ ບໍ່ເຮັດຄວາມງົດເວັ້ນຈາກກາເມສຸມິດສາຈານ ຯລຯ ເຮົາເຮັດແຕ່ມຸສາວາດ ບໍ່ເຮັດຄວາມງົດເວັ້ນຈາກມຸສາວາດ ຯລຯ ເຮົາເຮັດແຕ່ປິສຸນາວາຈາ ບໍ່ເຮັດຄວາມງົດເວັ້ນຈາກປິສຸນາວາຈາ ຯລຯ ເຮົາເຮັດແຕ່ຜະຣຸສະວາຈາ ບໍ່ເຮັດຄວາມງົດເວັ້ນຈາກຜະຣຸສະວາຈາ ຯລຯ ເຮົາເຮັດແຕ່ສຳຜັບປະລາປະ ບໍ່ເຮັດຄວາມງົດເວັ້ນຈາກສຳຜັບປະລາປະ ຯລຯ ເຮົາເຮັດແຕ່ອະພິດຊາ ບໍ່ເຮັດອະນະພິດຊາ ຯລຯ ເຮົາເຮັດແຕ່ພະຍາບາດ ບໍ່ເຮັດອັບພະຍາບາດ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາເຮັດແຕ່ມິດສາທິດຖິ ບໍ່ເຮັດສຳມາທິດຖິ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຮັດແລະຍ້ອນບໍ່ເຮັດ ເປັນແນວນີ້

ອີກໄນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາບໍ່ໄດ້ຮັກສາສິນໃຫ້ບໍລິບູນ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາບໍ່ສັງລວມໃນອິນຊີທັງ ໖ ຯລຯ ບໍ່ຮູ້ຈັກປະມານໃນການບໍຣິໂພກອາຫານ ຯລຯ ບໍ່ປະກອບຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ຯລຯ ບໍ່ໝັ່ນປະກອບສະຕິສຳປະຊັນຍະ ຯລຯ ບໍ່ຈະເລີນສະຕິປັດຖານ ໔ ຯລຯ ບໍ່ຈະເລີນສຳມັບປະທານ ໔ ຯລຯ ບໍ່ຈະເລີນອິດທິບາດ ໔ ຯລຯ ບໍ່ຈະເລີນອິນຊີ ໕ ຯລຯ ບໍ່ຈະເລີນພະລະ ໕ ຯລຯ ບໍ່ຈະເລີນໂພດຊົງ ໗ ຯລຯ ບໍ່ຈະເລີນອະຣິຍະມັກມີອົງ ໘ ຯລຯ ບໍ່ກຳນົດຮູ້ທຸກ ຯລຯ ບໍ່ລະສະມຸໄທ ຯລຯ ບໍ່ຈະເລີນມັກ ເຮົາບໍ່ເຮັດນິໂຣດໃຫ້ປະຈັກແຈ້ງ ຄວາມຄະນອງນີ້ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ບໍ່ຄະນອງ ລວມຄວາມວ່າ ຜູ້ບໍ່ໂອ້ອວດ ບໍ່ຄະນອງ

## ວ່າດ້ວຍປັນຍາຮຽກວ່າ ມັນຕາ

ຄຳວ່າ ຜູ້ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ ອະທິບາຍວ່າ ປັນຍາຕັດຮຽກວ່າ ມັນຕາ ຄືຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ມີວິເຄາະວ່າ ຜູ້ໃດກຳນົດກ່າວວາຈາດ້ວຍປັນຍາ ແມ່ນເວົ້າຫຼາຍ ແມ່ນກ່າວຫຼາຍ ແມ່ນສະແດງຫຼາຍ ແມ່ນຊີ້ແຈ່ງຫຼາຍ ກໍບໍ່ກ່າວຄຳເວົ້າທີ່ເປັນເລື້ອງເວົ້າຊົ່ວ ກ່າວຊົ່ວ ເຈຣະຈາຊົ່ວ ປາໄສຊົ່ວ ເລົ່າເລື່ອງຊົ່ວ ສະນັ້ນ ຜູ້ນັ້ນ ຈຶ່ງຊື່ວ່າຜູ້ເວົ້າດ້ວຍປັນຍາ

ຄວາມຟຸ້ງຊ່ານ ໃນຄຳວ່າ ບໍ່ຟຸ້ງຊ່ານ ເປັນແນວໃດ?

ຄື ຄວາມຟຸ້ງຊ່ານ ຄວາມບໍ່ສະງົບແຫ່ງຈິດ ໃຈກວັດແກວ່ງ ຄວາມຄິດວົກວົນ ນີ້ຕັດຮຽກວ່າ ຄວາມຟຸ້ງຊ່ານ

ຄວາມຟຸ້ງຊ່ານນີ້ ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ບໍ່ຟຸ້ງຊ່ານ ລວມຄວາມວ່າ ຜູ້ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ

## ວ່າດ້ວຍການສັງລວມວາຈາ

ຄຳວ່າ ບຸກຄົນ ໆລໆ ເປັນຜູ້ສັງລວມວາຈານັ້ນແລ ຊື່ວ່າເປັນມຸນີ ອະທິບາຍວ່າ ພິກຂຸໃນທຳວິໄນນີ້ລະການກ່າວຕົວະ ເວັ້ນຂາດຈາກການກ່າວຕົວະໄດ້ແລ້ວ ຄື ເປັນຄົນເວົ້າຈິງ ຕັ້ງໝັ້ນໃນຄວາມສັດ ມີຄຳເວົ້າໝັ້ນຄົງ ເຊື່ອຖືໄດ້ ບໍ່ກ່າວຄຳຫຼອກລວງຊາວໂລກ ລະວາຈາສັບສໍ່ ເວັ້ນຂາດຈາກວາຈາສັບສໍ່ໄດ້ແລ້ວ ຟັງຈາກຂ້າງນີ້ແລ້ວ ບໍ່ໄປບອກຂ້າງນັ້ນ ເພື່ອທຳລາຍຄົນໝູ່ນີ້ ຟັງຈາກຂ້າງນັ້ນແລ້ວ ບໍ່ມາບອກຂ້າງນີ້ ເພື່ອທຳລາຍຄົນໝູ່ນັ້ນ ເປັນຜູ້ສະໝານຄົນທີ່ແຕກແຍກກັນ ຫຼື ສົ່ງເສີມຄົນທີ່ມີປະໂຫຍດຮ່ວມກັນ ມີຄວາມສາມັກຄີເປັນທີ່ຊື່ນຊົມ ຍິນດີໃນຄວາມສາມັກຄີ ເບີກບານໃນສາມັກຄີທຳ ເປັນຜູ້ກ່າວວາຈາກໍ່ໃຫ້ເກີດຄວາມສາມັກຄີ ລະວາຈາຫຍາບ ເວັ້ນຂາດຈາກວາຈາຫຍາບໄດ້ແລ້ວ ວາຈາໃດ ຂາດໂທດ ສະບາຍຫູ ໜ້າຮັກ ຈັບໃຈ ແບບຊາວເມືອງ ຄົນສ່ວນໃຫຍ່ຖືກໃຈ ພໍໃຈ ກໍກ່າວວາຈາເຊັ່ນນັ້ນ ລະການເວົ້າເພີ້ເຈີ້ ເວັ້ນຂາດຈາກການເວົ້າເພີ້ເຈີ້ໄດ້ແລ້ວ ເວົ້າຖືກເວລາ ເວົ້າຈິງ ເວົ້າອີງອັດຖະ ເວົ້າອີງທຳ ເວົ້າອີງວິໄນ ກ່າວວາຈາມີຫຼັກຖານ ມີບ່ອນອ້າງອີງ ມີຕົ້ນ ມີປາຍ ປະກອບດ້ວຍປະໂຫຍດຕາມການອັນສົມຄວນ ປະກອບດ້ວຍວະຈີສຸດຈະຣິດ ໔ ກ່າວວາຈາປາສະຈາກໂທດ ໔ ສະຖານ ເປັນຜູ້ງົດແລ້ວ ງົດເວັ້ນແລ້ວ ເວັ້ນຂາດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວກັບເດຍຣັດສານກະຖາ ໓໒ ປະການ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່

ພິກຂຸຍ່ອມກ່າວກະຖາວັດຖຸ ໑໐ ປະການ ຄື

໑. ຍ່ອມກ່າວອັບປິດສະກະຖາ (ຄຳເວົ້າທີ່ນຳພາໃຫ້ມີຄວາມປາຖະໜາໜ້ອຍ)
໒. ສັນຕຸດຖີກະຖາ (ຄຳເວົ້າທີ່ນຳພາໃຫ້ມີຄວາມສັນໂດດ)
໓. ປະວິເວກກະຖາ (ຄຳເວົ້າທີ່ນຳພາໃຫ້ມີຄວາມສະຫງັດກາຍໃຈ)
໔. ອະສັງສັກຄະກະຖາ (ຄຳເວົ້າທີ່ນຳພາໃຫ້ບໍ່ຄຸກຄີດ້ວຍໝູ່)
໕. ວິຣິຍາຣຳພະກະຖາ (ຄຳເວົ້າທີ່ນຳພາໃຫ້ມຸ້ງໝັ້ນທຳຄວາມພຽນ)
໖. ສີລະກະຖາ (ຄຳເວົ້າທີ່ນຳພາໃຫ້ຕັ້ງຢູ່ໃນສີນ)
໗. ສະມາທິກະຖາ (ຄຳເວົ້າທີ່ນຳພາໃຫ້ເຮັດຈິດໝັ້ນ)
໘. ປັນຍາກະຖາ (ຄຳເວົ້າທີ່ນຳພາໃຫ້ເກີດປັນຍາ)
໙. ວິມຸດຕິກະຖາ (ຄຳເວົ້າທີ່ນຳພາໃຫ້ເຮັດໃຈໃຫ້ພົ້ນຈາກກິເລດແລະຄວາມທຸກ)
໑໐. ວິມຸດຕິຍານະທັດສະນະກະຖາ (ຄຳເວົ້າທີ່ນຳພາໃຫ້ສົນໃຈແລະເຂົ້າໃຈເລື້ອງຄວາມຮູ້ ຄວາມເຫັນໃນພາວະທີ່ຫຼຸດພົ້ນຈາກກິເລດແລະຄວາມທຸກ)

ຍ່ອມກ່າວສະຕິປັດຖານກະຖາ ສຳມັປປະທານກະຖາ ອິດທິບາດກະຖາ ອິນທະຣິຍະກະຖາ ພະລະກະຖາ ໂພດຊົງຄະກະຖາ ມັກຄະກະຖາ ຜະລະກະຖາ ນິບພານກະຖາ

ຄຳວ່າ ຜູ້ສັງລວມວາຈາ ໄດ້ແກ່ ຜູ້ສັງລວມ ເຄັ່ງຄັດ ຄຸ້ມຄອງ ປົກປັກ ຮັກສາ ສັງວອນສະງົບ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ ລວມຄວາມວ່າ ບຸກຄົນ ຯລຯ ເປັນຜູ້ສັງລວມວາຈາ ນັ້ນແລ ຊື່ວ່າເປັນມຸນີ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນຜູ້ບໍ່ໂກດ ບໍ່ສະດຸ້ງ ບໍ່ໂອ້ອວດ
ບໍ່ຄະນອງ ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ
ເປັນຜູ້ສັງລວມວາຈານັ້ນແລ ຊື່ວ່າເປັນມຸນີ

[໙໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນຜູ້ບໍ່ມີຕັນຫາເຄື່ອງຮັ້ງຈ່ອງໃນອະນາຄົດ
ບໍ່ເສົ້າໂສກເຖິງສິ່ງທີ່ລ່ວງໄປແລ້ວ ຜູ້ເຫັນວິເວກໃນຜັດສະທັງຫຼາຍ
ຍ່ອມບໍ່ຖືກນຳໄປໃນທິດຖິທັງຫຼາຍ

## ວ່າດ້ວຍຜູ້ບໍ່ມີຕັນຫາ

ຄຳວ່າ ບຸກຄົນຜູ້ບໍ່ມີຕັນຫາເຄື່ອງຮັ້ງຈ່ອງໃນອະນາຄົດ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ເຄື່ອງຮັ້ງຈ່ອງ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ ຕັນຫາເຄື່ອງຮັ້ງຈ່ອງນັ້ນ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ບຸກຄົນຜູ້ບໍ່ມີຕັນຫາເຄື່ອງຮັ້ງຈ່ອງໃນອະນາຄົດ ແນວນີ້ແດ່

ອີກໄນໜຶ່ງ ບຸກຄົນບໍ່ດຳເນີນຕາມຄວາມເພີດເພີນໃນຮູບວ່າ ໃນອະນາຄົດການ ເຮົາເພິ່ງມີຮູບແນວນີ້ ຯລຯ ເພິ່ງມີເວທະນາແນວນີ້ ຯລຯ ເພິ່ງມີສັນຍາແນວນີ້ ຯລຯ ເພິ່ງມີສັງຂານແນວນີ້ ຍ່ອມບໍ່ດຳເນີນຕາມຄວາມເພີດເພີນໃນວິນຍານວ່າ ໃນອະນາຄົດການ ເຮົາເພິ່ງມີວິນຍານແນວນີ້ ຈຶ່ງຊື່ວ່າ ຜູ້ບໍ່ມີຕັນຫາເຄື່ອງຮັ້ງຈ່ອງໃນອະນາຄົດ ແນວນີ້ແດ່

ອີກໄນໜຶ່ງ ບຸກຄົນບໍ່ຕັ້ງຈິດເພື່ອໃຫ້ໄດ້ຕາແລະຮູບທີ່ຍັງບໍ່ໄດ້ວ່າ ໃນອະນາຄົດການ ເຮົາເພິ່ງມີຕາເຊັ່ນນີ້ ເຫັນຮູບເຊັ່ນນີ້ ຍ້ອນມີການບໍ່ຕັ້ງຈິດເປັນປັດໄຈ ເຂົາຈຶ່ງບໍ່ເພີດເພີນຕາແລະຮູບ

ນັ້ນ ເມື່ອບໍ່ເພີດເພີນຕາແລະຮູບນັ້ນ ຈຶ່ງຊື່ວ່າບໍ່ມີຕັນຫາເຄື່ອງຮັ້ງຈ່ອງ ໃນອະນາຄົດ ແນວນີ້ແດ່ ໆລໆ ໃນອະນາຄົດການ ຂໍເຮົາເພິ່ງມີຫູເຊັ່ນນີ້ ໄດ້ຍິນສຽງເຊັ່ນນີ້ ບຸກຄົນບໍ່ຕັ້ງຈິດເພື່ອໃຫ້ໄດ້ໃຈ ແລະທຳມາຣົມທີ່ຍັງບໍ່ໄດ້ວ່າ ໃນອະນາຄົດການ ເຮົາເພິ່ງມີໃຈເຊັ່ນນີ້ ຮູ້ທຳມາຣົມເຊັ່ນນີ້ ຍ້ອນບໍ່ມີຄວາມຕັ້ງຈິດເປັນປັດໄຈ ເຂົາຈຶ່ງບໍ່ເພີດເພີນໃຈແລະທຳມາຣົມນັ້ນ ເມື່ອບໍ່ເພີດເພີນໃຈແລະທຳມາຣົມນັ້ນ ຈຶ່ງຊື່ວ່າ ບໍ່ມີຕັນຫາເຄື່ອງຮັ້ງຈ່ອງໃນອະນາຄົດ ແນວນີ້ແດ່

ອີກໄນໜຶ່ງ ບຸກຄົນບໍ່ຕັ້ງຈິດເພື່ອໃຫ້ໄດ້ພົບທີ່ຍັງບໍ່ໄດ້ວ່າ ເຮົາຈັກເປັນເທບ ຫຼື ເທວະດາຕົນໃດຕົນໜຶ່ງດ້ວຍສິນ ຂໍ້ວັດ ຕະບະ ຫຼື ພົມມະຈັນນີ້ ຍ້ອນມີການບໍ່ຕັ້ງຈິດເປັນປັດໄຈ ເຂົາຈຶ່ງບໍ່ເພີດເພີນພົບນັ້ນ ເມື່ອບໍ່ເພີດເພີນໃນພົບນັ້ນ ຈຶ່ງຊື່ວ່າ ບໍ່ມີຕັນຫາເຄື່ອງຮັ້ງຈ່ອງໃນອະນາຄົດ ແນວນີ້ແດ່

## ວ່າດ້ວຍຜູ້ບໍ່ເສົ້າໂສກ

ຄຳວ່າ ບໍ່ເສົ້າໂສກເຖິງສິ່ງທີ່ລ່ວງໄປແລ້ວ ອະທິບາຍວ່າ ບໍ່ເສົ້າໂສກເຖິງສິ່ງທີ່ຜັນປ່ຽນໄປ ຫຼື ເມື່ອສິ່ງນັ້ນຜັນປ່ຽນໄປແລ້ວກໍບໍ່ເສົ້າໂສກ ຄື ບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຕາຂອງເຮົາຜັນປ່ຽນໄປ ບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຫູຂອງເຮົາ ໆລໆ ດັງຂອງເຮົາ ໆລໆ. ລີ້ນຂອງເຮົາ ໆລໆ ກາຍຂອງເຮົາ ໆລໆ ຮູບຂອງເຮົາ ໆລໆ ສຽງຂອງເຮົາ ໆລໆ ກິ່ນຂອງເຮົາ ໆລໆ ຣົດຂອງເຮົາ ໆລໆ ໂຜດຖັບພະຂອງເຮົາ ໆລໆ ຕະກູນຂອງເຮົາ ໆລໆ ຈີວອນຂອງເຮົາ ໆລໆ ໝູ່ຄະນະຂອງເຮົາ ໆລໆ ອາວາດຂອງເຮົາ ໆລໆ ລາບຂອງເຮົາ ໆລໆ ຍົດຂອງເຮົາ ໆລໆ ສັນເສີນຂອງເຮົາ ໆລໆ ສຸກຂອງເຮົາ ໆລໆ ບິນທະບາດຂອງເຮົາ ໆລໆ ເສນາສະນະຂອງເຮົາ ໆລໆ ຄິລານະປັດໄຈເພສັດບໍຣິຂານຂອງເຮົາ ໆລໆ ມານດາຂອງເຮົາ ໆລໆ ບິດາຂອງເຮົາ ໆລໆ ອ້າຍນ້ອງຊາຍຂອງເຮົາ ໆລໆ ເອື້ອຍນ້ອງສາວຂອງເຮົາ ໆລໆ ບຸດຂອງເຮົາ ໆລໆ ທິດາຂອງເຮົາ ໆລໆ ມິດແລະອຳມາດຂອງເຮົາ ໆລໆ ຍາດຂອງເຮົາ ຜູ້ຮ່ວມສາຍໂລຫິດຂອງເຮົາຜັນປ່ຽນໄປ ດັ່ງນີ້ ລວມຄວາມວ່າ ບໍ່ເສົ້າໂສກເຖິງສິ່ງທີ່ລ່ວງໄປແລ້ວ

## ວ່າດ້ວຍຜັດສະ

ຄຳວ່າ ຜູ້ເຫັນວິເວກໃນຜັດສະທັງຫຼາຍ ອະທິບາຍວ່າ

ຄຳວ່າ ຜັດສະ ໄດ້ແກ່ ຈັກຂຸສຳຜັດ ໂສຕະສຳຜັດ ຄານະສຳຜັດ ຊິວຫາສຳຜັດ ກາຍະສຳຜັດ ມະໂນສຳຜັດ ອະທິວະຈະນະສຳຜັດ ປະຕິຄະສຳຜັດ ສຸກຂະເວທະນີຍະ ສຳຜັດ ທຸກຂະເວທະນີຍະສຳຜັດ ອະທຸກຂະມະສຸກຂະເວທະນີຍະສຳຜັດ ຜັດສະທີ່ເປັນກຸສົນ ຜັດສະທີ່ເປັນອະກຸສົນ ຜັດສະທີ່ເປັນອັບພະຍາກະຕະ ຜັດສະທີ່ເປັນການາວະຈອນ ຜັດສະທີ່ເປັນຮູບປາວະຈອນ ຜັດສະທີ່ເປັນອະຮູບປາວະຈອນ ສູນຍະຕະຜັດສະ ອະນິມິດຕະຜັດສະ ອັບປະນິຫິຕະຜັດ

ສະ ຜັດສະທີ່ເປັນໂລກິຍະ ຜັດສະທີ່ເປັນໂລກຸດຕະຣະ ຜັດສະທີ່ເປັນອະດີດ ຜັດສະທີ່ເປັນອະນາຄົດ ຜັດສະທີ່ເປັນປັດຈຸບັນ ຜັດສະ ຄວາມຖືກຕ້ອງ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ເຫັນປານນີ້ ນີ້ຕັດຮຽກວ່າ ຜັດສະ

ຄຳວ່າ ຜູ້ເຫັນວິເວກໃນຜັດສະທັງຫຼາຍ ອະທິບາຍວ່າ ບຸກຄົນເຫັນຈັກຂຸສຳຜັດວ່າ ວ່າງຈາກຕົນ ຈາກທຳທີ່ເນື່ອງໃນຕົນ ຈາກຄວາມທ່ຽງ ຈາກຄວາມຍັ້ງຍືນ ຈາກຄວາມສືບຕໍ່ ຫຼືຈາກທຳທີ່ບໍ່ຜັນປ່ຽນ ເຫັນໂສຕະສຳຜັດ ฯລฯ ຄານະສຳຜັດ ฯລฯ ຊິວຫາສຳຜັດ ฯລฯ ກາຍສຳຜັດ ฯລฯ ມະໂນສຳຜັດ ฯລฯ ອະທິວະຈະນະສຳຜັດ ฯລฯ ປະຕິຄະສຳຜັດ ฯລฯ ສຸກຂະເວທະນີຍະຜັດສະ ฯລฯ ທຸກຂະເວທະນີຍະຜັດສະ ฯລฯ ອະທຸກຂະມະສຸກຂະເວທະນີຍະຜັດສະ ฯລฯ ຜັດສະທີ່ເປັນກຸສົນ ฯລฯ ຜັດສະທີ່ເປັນອະກຸສົນ ฯລฯ ຜັດສະທີ່ເປັນອັບພະຍາກະຕະ ฯລฯ ຜັດສະທີ່ເປັນກາມາວະຈອນ ฯລฯ ຜັດສະທີ່ເປັນຮູບປາວະຈອນ ฯລฯ ຜັດສະທີ່ເປັນອະຮູບປາວະຈອນ ฯລฯ ຜັດສະທີ່ເປັນໂລກິຍະ ฯລฯ ເຫັນຜັດສະທີ່ເປັນໂລກຸດຕະຣະວ່າ ວ່າງຈາກຕົນ ຈາກທຳທີ່ເນື່ອງໃນຕົນ ຈາກຄວາມທ່ຽງ ຈາກຄວາມຍັ້ງຍືນ ຈາກຄວາມສືບຕໍ່ ຫຼື ຈາກທຳທີ່ບໍ່ຜັນປ່ຽນ

ອີກໄນໜຶ່ງ ບຸກຄົນເຫັນຜັດສະທີ່ເປັນອະດີດວ່າ ວ່າງຈາກຜັດສະທີ່ເປັນອະນາຄົດແລະຜັດສະທີ່ເປັນປັດຈຸບັນ ເຫັນຜັດສະທີ່ເປັນອະນາຄົດວ່າ ວ່າງຈາກຜັດສະທີ່ເປັນອະດີດແລະຜັດສະທີ່ເປັນປັດຈຸບັນ ເຫັນຜັດສະທີ່ເປັນປັດຈຸບັນວ່າ ວ່າງຈາກຜັດສະທີ່ເປັນອະດີດແລະຜັດສະທີ່ເປັນອະນາຄົດ

ອີກໄນໜຶ່ງ ບຸກຄົນເຫັນຜັດສະທີ່ເປັນອະຣິຍະ ບໍ່ມີອາສະວະ ເປັນໂລກຸດຕະຣະ ປະຕິສັງຍຸດດ້ວຍສູນຍະຕະທຳວ່າ ວ່າງຈາກຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະ ມັກຂະ ປະລາສະ ອິດສາ ມັດສະຣິຍະ ມາຍາ ສາເຖີຍຍະ ຖຳພະ ສາຣຳພະ ມານະ ອະຕິມານະ ມະທະ ປະມາທະ ກິເລດທຸກຊະນິດ ທຸດຈະຣິດທຸກທາງ ຄວາມກະວົນກະວາຍທຸກຢ່າງ ຄວາມຮ້ອນຮົນທຸກສະຖານ ຄວາມເດືອດຮ້ອນທຸກປະການ ອະກຸສະລາພິສັງຂານທຸກປະເພດ ດ້ວຍປະການແນວນີ້ ລວມຄວາມວ່າ ຜູ້ເຫັນວິເວກໃນຜັດສະທັງຫຼາຍ

ຄຳວ່າ ຍ່ອມບໍ່ຖືກນຳໄປໃນທິດຖິທັງຫຼາຍ ອະທິບາຍວ່າ ທິດຖິ ໖໘ ບຸກຄົນນັ້ນ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ບຸກຄົນນັ້ນຍ່ອມບໍ່ໄປ ບໍ່ອອກ ບໍ່ຖືກພາໄປ ບໍ່ຖືກນຳໄປດ້ວຍທິດຖິ ບຸກຄົນນັ້ນຈຶ່ງບໍ່ກັບຖື ບໍ່ຫວນກັບມາສູ່ທິດຖິນັ້ນວ່າເປັນສາຣະອີກ ລວມຄວາມວ່າ ຍ່ອມບໍ່ຖືກນຳໄປໃນທິດຖິທັງຫຼາຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ບຸກຄົນຜູ້ບໍ່ມີຕັນຫາເຄື່ອງຮັ້ງຈ່ອງໃນອະນາຄົດ
ບໍ່ເສົ້າໂສກເຖິງສິ່ງທີ່ລ່ວງໄປແລ້ວ ຜູ້ເຫັນວິເວກໃນຜັດສະທັງຫຼາຍ
ຍ່ອມບໍ່ຖືກນຳໄປໃນທິດຖິທັງຫຼາຍ

[໗໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນເປັນຜູ້ຫຼີບຫຼີກ ບໍ່ຫຼອກລວງ ບໍ່ທະເຍີທະຍານ
ບໍ່ຂີ້ຖີ່ ບໍ່ຄະນອງ ບໍ່ເປັນທີ່ໜ້າຣັງກຽດ
ແລະບໍ່ປະກອບໃນຄວາມເປັນຜູ້ມີວາຈາສັບສົ່ນ

## ວ່າດ້ວຍຜູ້ຫຼີບຫຼີກ

ຄຳວ່າ ບຸກຄົນເປັນຜູ້ຫຼີບຫຼີກ ໃນຄຳວ່າ ບຸກຄົນເປັນຜູ້ຫຼີບຫຼີກ ບໍ່ຫຼອກລວງ ອະທິບາຍວ່າ ຊື່ວ່າເປັນຜູ້ຫຼີບຫຼີກ ຍ້ອນລະຣາຄະໄດ້ແລ້ວ ຯລຯ ຍ້ອນລະໂທສະໄດ້ແລ້ວ ຯລຯ ຍ້ອນລະໂມຫະໄດ້ແລ້ວ ຯລຯ ຍ້ອນລະໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ຊື່ວ່າເປັນຜູ້ຫຼີບຫຼີກ ຍ້ອນລະອະກຸສະລາພິສັງຂານທຸກປະເພດໄດ້ແລ້ວ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພິກຂຸທັງຫຼາຍ ພິກຂຸເປັນຜູ້ຫຼີບຫຼີກ ເປັນແນວໃດ? ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເປັນຜູ້ລະອັດສະມິມານະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານ ທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພິກຂຸທັງຫຼາຍ ພິກຂຸເປັນຜູ້ຫຼີບຫຼີກ ເປັນແນວນີ້ ລວມຄວາມວ່າ ເປັນຜູ້ຫຼີບຫຼີກ

## ວ່າດ້ວຍຄວາມຫຼອກລວງ ໓ ຢ່າງ

ຄຳວ່າ ບໍ່ຫຼອກລວງ ໄດ້ແກ່ ຄວາມຫຼອກລວງ ໓ ຢ່າງ ຄື

໑. ຄວາມຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ
໒. ຄວາມຫຼອກລວງກ່ຽວກັບອິລິຍາບົດ
໓. ຄວາມຫຼອກລວງກ່ຽວກັບການເວົ້າລຽບຄຽງ

ຄວາມຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ ເປັນແນວໃດ?

ຄື ຄະຫະບໍດີໃນໂລກນີ້ ຍ່ອມນິມົນພິກຂຸ ຖວາຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ ພິກຂຸນັ້ນ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກ ຄອບງຳ ມີຄວາມຕ້ອງການຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍ ຣິຂານ

ຍ້ອນຕ້ອງການໄດ້ໃຫ້ຫຼາຍຍິ່ງຂຶ້ນ ຈຶ່ງບອກຄືນຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານເວົ້າແນວນີ້ວ່າ ຈີວອນທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນທ່ຽວເລືອກເກັບຜ້າເກົ່າຈາກປ່າຊ້າ ກອງຂີ້ເຫຍື່ອ ຫຼື ຮ້ານຕະຫຼາດເອົາມາເຮັດສັງຄາຕິໃຊ້ ຈຶ່ງຈະເປັນການເໝາະສົມ ບິນທະບາດທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດ

ແກ່ສະມະນະ ສະມະນະຄວນສຳເລັດຄວາມເປັນຢູ່ດ້ວຍກ້ອນເຂົ້າທີ່ໄດ້ມາດ້ວຍລຳແຂ້ງ ໂດຍການທ່ຽວສະແຫວງຫາ ຈຶ່ງຈະເປັນການເໝາະສົມ ເສນາສະນະທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນຢູ່ທີ່ເຫງົ້າໄມ້ ຢູ່ທີ່ປ່າຊ້າ ຫຼື ຢູ່ກາງແຈ້ງ ຈຶ່ງຈະເປັນການເໝາະສົມ ຄິລານະປັດໄຈ ເພສັດບໍຣິຂານທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນເຮັດຢາດ້ວຍນ້ຳມູນເນົ່າ ຫຼື ຕ່ອນໝາກສົ້ມມໍ ຈຶ່ງຈະເປັນການເໝາະສົມ

ຍ້ອນຕ້ອງການໄດ້ໃຫ້ຫຼາຍຍິ່ງຂຶ້ນນັ້ນ ທ່ານຈຶ່ງຄອງຈີວອນເສົ້າໝອງ ສັນບິນທະບາດເສົ້າໝອງ ໃຊ້ສອຍເສນາສະນະຊອມຊໍ່ ໃຊ້ຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ຄະຫະບໍດີທັງຫຼາຍຮູ້ຈັກພິກຂຸນັ້ນແນວນີ້ວ່າ ສະມະນະອົງນີ້ ມີຄວາມປາຖະໜາໜ້ອຍ ສັນໂດດ ສະງົບສະຫງັດ ບໍ່ຄຸກຄີດ້ວຍໝູ່ຄະນະ ຜາຣົບຄວາມພຽນ ມີວາທະກຳຈັດຂັດເກົາ ກໍຍິ່ງນິມົນທ່ານໃຫ້ຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຫຼາຍຍິ່ງຂຶ້ນ ທ່ານຈຶ່ງເວົ້າແນວນີ້ວ່າ ຍ້ອນພຽບພ້ອມດ້ວຍເຫດ ໓ ປະການ ກຸນລະບຸດຜູ້ມີສັດທາ ຍ່ອມປະສົບບຸນຫຼາຍ ຄື ຍ້ອນພຽບພ້ອມດ້ວຍສັດທາ ໆລໆ ຍ້ອນພຽບພ້ອມດ້ວຍ ໄທຍະທຳ ໆລໆ ຍ້ອນພຽບພ້ອມດ້ວຍພຣະທັກຂິໄນຍະບຸກຄົນ ກຸນລະບຸດຜູ້ມີສັດທາຍ່ອມປະສົບບຸນຫຼາຍ ທ່ານທັງຫຼາຍມີສັດທານີ້ຢູ່ ໄທຍະທຳນີ້ກໍມີຢູ່ພ້ອມ ທັງອາດຕະມາພາບ ກໍເປັນປະຕິຄາຫົກ ຖ້າອາດຕະມາພາບບໍ່ຮັບ ພວກທ່ານກໍຈັກເສື່ອມຈາກບຸນໄປສາ ອາດຕະມາພາບ ບໍ່ໄດ້ມີຄວາມຕ້ອງການດ້ວຍປັດໄຈນີ້ ແຕ່ຈັກຮັບເພື່ອອະນຸເຄາະພວກທ່ານ ຍ້ອນອາໄສ ເຫດນັ້ນ ທ່ານຈຶ່ງຮັບຈີວອນຫຼວງຫຼາຍ ຮັບບິນທະບາດຫຼວງຫຼາຍ ຮັບເສນາສະນະຫຼວງຫຼາຍ ຮັບຄິລານະປັດໄຈເພສັດບໍຣິຂານຫຼວງຫຼາຍ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງເຫັນປານນີ້ ນີ້ຊື່ວ່າຄວາມຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ

ຄວາມຫຼອກລວງກ່ຽວກັບອິລິຍາບົດ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກ ຄອບງຳປາຖະໜາຈະໃຫ້ເຂົາຍ້ອງຍໍ ຄິດວ່າ ຄົນຈັກຍ້ອງຍໍເຮົາດ້ວຍອຸບາຍແນວນີ້ ຈຶ່ງສັງລວມການຍ່າງສັງລວມການຢືນ ສັງລວມການນັ່ງ ສັງລວມການນອນ ຕັ້ງສະຕິຍ່າງ ຕັ້ງສະຕິຢືນ ຕັ້ງສະຕິນັ່ງຕັ້ງສະຕິນອນ ເຮັດທຳທ່າຄືພິກຂຸມີສະມາທິຍ່າງ ຄືພິກຂຸມີສະມາທິຢືນ ຄືພິກຂຸມີ ສະມາທິນັ່ງ ຄືພິກຂຸມີສະມາທິນອນ ເປັນຄືພິກຂຸຈະເລີນຊານອວດຕໍ່ໜ້າ ການຕັ້ງທ່າ ການວາງທ່າ ການດຳຣົງໝັ້ນອິລິຍາບົດ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງພາວະທີ່ຫຼອກລວງ ເຫັນປານນີ້ ນີ້ຮຽກວ່າ ຄວາມຫຼອກລວງກ່ຽວກັບອິລິຍາບົດ

ຄວາມຫຼອກລວງກ່ຽວກັບການເວົ້າລຽບຄຽງ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກ ຄອບງຳປາຖະໜາຈະໃຫ້ເຂົາຍ້ອງຍໍ ຄິດວ່າ ຄົນຈັກຍ້ອງຍໍເຮົາດ້ວຍອຸບາຍແນວນີ້ ຈຶ່ງກ່າວວາຈາອີງອະ

ຣິຍະທຳ ຄືເວົ້າວ່າ ພິກຂຸຜູ້ຊົງຈີວອນ ມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ຜູ້ໃຊ້ບາດ ຯລຯ ໃຊ້ພາຊະນະໂລຫະ ຯລຯ ໃຊ້ກະບອກ ຯລຯ ໃຊ້ຜ້າກອງນ້ຳ ຯລຯ ໃຊ້ລູກກະແຈ ຯລຯ ໃຊ້ເກີບ ຯລຯ ໃຊ້ປະຄົດແອວ ຯລຯ ໃຊ້ສາຍບາດ ມີຮູບແບບແນວນີ້ ເປັນສະມະນະ ມີສັກໃຫຍ່ ເວົ້າວ່າ ພິກຂຸຜູ້ມີອຸປັດຊາຣະດັບນີ້ ເປັນສະມະນະມີສັກໃຫຍ່ ມີອາຈານຣະດັບນີ້ ຯລຯ ມີຜູ້ຮ່ວມອຸປັດຊາຣະດັບນີ້ ຯລຯ ມີຜູ້ຮ່ວມອາຈານຣະດັບນີ້ ຯລຯ ມີມິດ ຯລຯ ມີພັກພວກ ຯລຯ ມີຄົນທີ່ຄົບຫາກັນ ຯລຯ ມີສະຫາຍຣະດັບນີ້ ເປັນສະມະນະມີສັກໃຫຍ່ ເວົ້າວ່າ ພິກຂຸຜູ້ຢູ່ໃນວິຫານມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ຯລຯ ຢູ່ໃນເຮືອນມີຫຼັງຄາດ້ານດຽວມີຮູບແບບແນວນີ້ ຯລຯ ຢູ່ໃນຜາສາດ ຯລຯ ຢູ່ໃນເຮືອນໂລ້ນ ຯລຯ ຢູ່ໃນຖ້ຳ ຯລຯ ຢູ່ໃນທີ່ຫຼີບຫຼີກ ຯລຯ ຢູ່ໃນກະດີ ຯລຯ ຢູ່ໃນເຮືອນຍອດ ຯລຯ ຢູ່ທີ່ປ້ອມ ຯລຯ ຢູ່ໃນໂຮງມົນ ຯລຯ ຢູ່ໃນເຮືອນພັກ ຯລຯ ຢູ່ໃນເຮືອນຮັບຮອງ ຯລຯ ຢູ່ໃນມົນດົບ ຯລຯ ຢູ່ທີ່ເຫງົ້າໄມ້ ມີຮູບແບບ ແນວນີ້ ເປັນສະມະນະມີສັກໃຫຍ່

ອີກໄນໜຶ່ງ ພິກຂຸເປັນຜູ້ວາງໜ້າເສີຍເມີຍ ເຮັດໜ້ານິ່ວຄິ້ວຂະໝວດ ເວົ້າຕິວະ ຫຼອກລວງ ປີ້ນປ້ອນ ເປັນຜູ້ໄດ້ຮັບຍ້ອງຍໍດ້ວຍການວາງໜ້າວ່າ ສະມະນະນີ້ໄດ້ວິຫາຣະສະມາບັດ ອັນມີຢູ່ເຫັນປານນີ້ ພິກຂຸນັ້ນ ຍ່ອມກ່າວຄຳເວົ້າເຊັ່ນນັ້ນ ອັນກ່ຽວເນື່ອງ ດ້ວຍໂລກຸດຕະຣະທຳແລະສູນຍະຕະນິບພານ ອັນເລິກເຊິ່ງ ຊ້ອນລັບ ລະອຽດອ່ອນ ປິດບັງ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງ ເຫັນປານນີ້ ນີ້ຮຽກວ່າ ຄວາມຫຼອກລວງກ່ຽວກັບການເວົ້າລຽບຄຽງ

ຄວາມຫຼອກລວງ ໓ ຢ່າງ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ບໍ່ຫຼອກລວງ ລວມຄວາມວ່າ ເປັນຜູ້ຫຼີບຫຼີກ ບໍ່ຫຼອກລວງ

ຄຳວ່າ ບໍ່ທະເຍີທະຍານ ບໍ່ຂີ້ຖີ່ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມທະເຍີທະຍານ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາ ຄື ຄວາມທະເຍີທະຍານນັ້ນ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ບໍ່ທະເຍີທະຍານ ຜູ້ນັ້ນບໍ່ມຸ້ງໝາຍ ບໍ່ຕ້ອງການໄດ້ ບໍ່ຍິນດີ ບໍ່ປາຖະໜາ ບໍ່ມຸ້ງຫວັງ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ກາມທາດ ຯລຯ ຮູບທາດ ຯລຯ ອະຮູບທາດ ຯລຯ ກາມະພົບ ຯລຯ ຮູບພົບ ຯລຯ ອະຮູບພົບ ຯລຯ ສັນຍາພົບ ຯລຯ ອະສັນຍາ

ພົບ ໆລໆ ເນວະສັນຍານາສັນຍາພົບ ໆລໆ ເອກະໂວກາຣະພົບ ໆລໆ ຈະຕຸໂວກາຣະພົບ ໆລໆ ປັນຈະໂວກາຣະພົບ ໆລໆ ອະດີດ ໆລໆ ອະນາຄົດ ໆລໆປັດຈຸບັນ ໆລໆ ບໍ່ມຸ້ງໝາຍ ບໍ່ຕ້ອງການໄດ້ ບໍ່ຍິນດີ ບໍ່ປາຖະໜາ ບໍ່ມຸ້ງຫວັງຮູບທີ່ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ລວມຄວາມວ່າ ຜູ້ບໍ່ທະເຍີທະຍານ

## ວ່າດ້ວຍຄວາມຂີ້ຖີ່ ໕ ຢ່າງ

ຄຳວ່າ ບໍ່ຂີ້ຖີ່ ໄດ້ແກ່ ມັດສະຣິຍະ ໕ ຢ່າງ ຄື

໑. ອາວາສະມັດສະຣິຍະ ໔. ກຸລະມັດສະຣິຍະ
໓. ລາພະມັດສະຣິຍະ ໔. ວັນນະມັດສະຣິຍະ
໕. ທຳມະມັດສະຣິຍະ

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມເຫັນແກ່ໄດ້ ຄວາມຖີ່ໜຽວ ຄວາມທີ່ຈິດເຈັບຮ້ອນ (ໃນການໃຫ້) ຄວາມທີ່ຈິດຫວງແຫນເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຂີ້ຖີ່

ອີກໄນໜຶ່ງ ຄວາມຂີ້ຖີ່ຂັນກໍດີ ຄວາມຂີ້ຖີ່ທາດກໍດີ ຄວາມຂີ້ຖີ່ອາຍະຕະນະກໍດີ ຄວາມມຸ້ງແຕ່ຈະໄດ້ກໍດີ ນີ້ຕັດຮຽກວ່າ ຄວາມຂີ້ຖີ່ ຄວາມຂີ້ຖີ່ນີ້ບຸກຄົນໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ບຸກຄົນນັ້ນ ຕັດຮຽກວ່າ ຜູ້ບໍ່ຂີ້ຖີ່ ລວມຄວາມວ່າ ບໍ່ທະເຍີທະຍານ ບໍ່ຂີ້ຖີ່

## ວ່າດ້ວຍຄວາມຄະນອງ ໓ ຢ່າງ

ຄຳວ່າ ບໍ່ຄະນອງ ບໍ່ເປັນທີ່ໜ້າຣັງກຽດ ອະທິບາຍວ່າ
ຄຳວ່າ ຄວາມຄະນອງ ໄດ້ແກ່ ຄວາມຄະນອງ ໓ ຢ່າງ ຄື

໑. ຄວາມຄະນອງທາງກາຍ
໔. ຄວາມຄະນອງທາງວາຈາ
໓. ຄວາມຄະນອງທາງໃຈ

ຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງກໍສະແດງຄວາມຄະນອງທາງກາຍ ຢູ່ໃນໝູ່ຄະນະ ໆລໆ ຢູ່ໃນສາລາຫໍສັນ ໆລໆ ຢູ່ໃນເຮືອນໄຟ ໆລໆ ຢູ່ທີ່ທ່ານ້ຳ ໆລໆ ກຳລັງເຂົ້າສູ່ບໍລິເວນເຮືອນ ໆລໆ ເຂົ້າສູ່ບໍລິເວນເຮືອນແລ້ວ ກໍສະແດງຄວາມຄະນອງທາງກາຍ

ພິກຂຸຢູ່ໃນໝູ່ສົງສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງກໍບໍ່ເຮັດຄວາມຢຳເກງ ຢືນບຽດສຽດພິກຂຸເຖຣະແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່ ນັ່ງຄຸມຫົວແດ່ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ສົງສະແດງ ຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ຄະນະກໍບໍ່ເຮັດຄວາມຢຳເກງ ເມື່ອພິກຂຸເຖຣະບໍ່ສຸບເກີບຢ່າງຈົງກົມຢູ່ ກໍສຸບເກີບຢ່າງຈົງກົມ ເມື່ອພິກຂຸເຖຣະຍ່າງຈົງກົມເທິງເດີ່ນຈົງກົມຕ່ຳກໍຍ່າງຈົງກົມເທິງເດີ່ນຈົງກົມສູງ ເມື່ອພິກຂຸເຖຣະຍ່າງຈົງກົມເທິງພື້ນດິນ ກໍຍ່າງຈົງກົມເທິງເດີ່ນຈົງກົມ ຢືນບຽດສຽດແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່ ນັ່ງຄຸມຫົວແດ່ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ໃນສາລາຫໍສັນສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນສາລາຫໍສັນ ກໍບໍ່ເຮັດຄວາມຢຳເກງ ນັ່ງແຊກພິກຂຸເຖຣະແດ່ ນັ່ງກີດກັນອາສະນະພິກຂຸນະວະກະແດ່ ຢືນບຽດສຽດແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່ ນັ່ງຄຸມຫົວແດ່ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນສາລາຫໍສັນສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ໃນເຮືອນໄຟສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນເຮືອນໄຟ ບໍ່ເຮັດຄວາມຢຳເກງ ຢືນບຽດສຽດພິກຂຸເຖຣະແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່ ບໍ່ບອກກ່ອນແລ້ວໃສ່ຟືນແດ່ ບໍ່ບອກກ່ອນແລ້ວອັດປະຕູແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນເຮືອນໄຟສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ທີ່ທ່ານ້ຳສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ທີ່ທ່ານ້ຳບໍ່ເຮັດຄວາມຢຳເກງ ລົງບຽດສຽດພິກຂຸເຖຣະແດ່ ລົງຂ້າງໜ້າແດ່ ອາບບຽດສຽດແດ່ ອາບຂ້າງໜ້າແດ່ ອາບເໜືອນ້ຳແດ່ ຂຶ້ນບຽດສຽດແດ່ ຂຶ້ນຂ້າງໜ້າແດ່ ຂຶ້ນເໜືອນ້ຳແດ່ ພິກຂຸຢູ່ທີ່ທ່ານ້ຳສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸກຳລັງເຂົ້າສູ່ບໍລິເວນເຮືອນສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ກຳລັງເຂົ້າສູ່ບໍລິເວນເຮືອນ ບໍ່ເຮັດຄວາມຢຳເກງ ຍ່າງບຽດສຽດພິກຂຸເຖຣະແດ່ ຍ່າງຂ້າງໜ້າແດ່ ຍ່າງແຊງຂຶ້ນໜ້າພິກຂຸເຖຣະແດ່ ພິກຂຸກຳລັງເຂົ້າສູ່ບໍລິເວນເຮືອນສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸເຂົ້າສູ່ບໍລິເວນເຮືອນແລ້ວສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເຂົ້າສູ່ບໍລິເວນເຮືອນແລ້ວ ເມື່ອເຂົາບອກວ່າ ຂໍຢ່າໄດ້ເຂົ້າໄປເດີ້ທ່ານ ກໍຍັງເຂົ້າໄປ ເມື່ອເຂົາບອກວ່າ ຢ່າຢືນເດີ້ທ່ານ ກໍຍັງຢືນຂຶ້ນ ເມື່ອເຂົາບອກວ່າ ຂໍຢ່ານັ່ງເດີ້ທ່ານ ກໍຍັງນັ່ງລົງ ເຂົ້າໄປສູ່ທີ່ເປັນໂອກາດບໍ່ສົມຄວນແດ່ ຢືນໃນທີ່ເປັນໂອກາດບໍ່ສົມຄວນແດ່ ນັ່ງໃນທີ່ເປັນໂອກາດບໍ່ສົມຄວນແດ່ ຮີບຟ້າວເຂົ້າໄປໃນຫ້ອງນ້ອຍທີ່ລັບປົກປິດຂອງຕະກູນແດ່ ໃນຫ້ອງທີ່ກຸນລະສະຕີ ກຸນລະທິດາ ສະໃພ້ຂອງຕະກູນ ກຸມາຣີຂອງຕະກູນນັ່ງຢູ່ແດ່ ລູບຫົວເດັກນ້ອຍຫຼິ້ນແດ່ ພິກຂຸເຂົ້າສູ່ບໍລິເວນເຮືອນແລ້ວສະແດງຄວາມຄະນອງທາງກາຍ ເປັນແນວນີ້ ນີ້ຊື່ວ່າຄວາມຄະນອງທາງກາຍ

ຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງສະແດງຄວາມຄະນອງທາງວາຈາແດ່ ຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງວາຈາແດ່ ເຂົ້າສູ່ບໍລິເວນເຮືອນແລ້ວສະແດງຄວາມຄະນອງທາງວາຈາແດ່

ພິກຂຸຢູ່ໃນໝູ່ສົງສະແດງຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງບໍ່ເຮັດຄວາມຢຳເກງ ບໍ່ຮຽນແຈ້ງພິກຂຸເຖຣະ ຫຼືບໍ່ໄດ້ຮັບອາຣາດທະນາ ກໍສະແດງທຳ ວິສັດຊະນາບັນຫາ ສູດປາຕິໂມກແກ່ພິກຂຸທີ່ຢູ່ໃນອາຣາມ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ສົງສະແດງຄວາມຄະນອງທາງວາຈາ ເປັນແນວນີ້

ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ຄະນະບໍ່ເຮັດຄວາມຢຳເກງ ບໍ່ຮຽນແຈ້ງພິກຂຸເຖຣະ ຫຼື ບໍ່ໄດ້ຮັບອາຣາດທະນາ ກໍສະແດງທຳ ວິສັດຊະນາບັນຫາແກ່ພິກຂຸທັງຫຼາຍທີ່ຢູ່ໃນອາຣາມ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ສະແດງທຳ ວິສັດຊະນາບັນຫາ ແກ່ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາທີ່ຢູ່ໃນອາຣາມ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງວາຈາ ເປັນແນວນີ້

ພິກຂຸເຂົ້າສູ່ບໍລິເວນເຮືອນແລ້ວ ສະແດງຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເຂົ້າສູ່ບໍລິເວນເຮືອນແລ້ວ ເວົ້າກັບສະຕີຫຼືເດັກຍິງແນວນີ້ວ່າ ນາງນ້ອຍຊື່ນີ້ ນາມສະກຸນນີ້ ມີອັນໃດແດ່ບໍ ເຂົ້າຕົ້ມມີບໍ ເຂົ້າໜຶ້ງມີບໍ ຂອງຂົບຄ້ຽວມີແດ່ບໍ ພວກອາດຕະມາຈັກດື່ມອັນໃດ ຈັກສັນອັນໃດ ຈັກຄ້ຽວອັນໃດ ມີອັນໃດແດ່ ຫຼື ພວກທ່ານຈັກຖວາຍອັນໃດແກ່ອາດຕະມາແດ່ບໍ ເວົ້າຮ້ອງຂໍໄປ ເວົ້າໂລເລ ເວົ້າເພີ້ ການເວົ້າເພີ້ເຈີ້ ເວົ້າພ່ຳເພີ້ ກິຣິຍາທີ່ເວົ້າພ່ຳເພີ້ ພາວະທີ່ເວົ້າພ່ຳເພີ້ ເຫັນປານນີ້ ພິກຂຸເຂົ້າສູ່ບໍລິເວນເຮືອນແລ້ວ ສະແດງຄວາມຄະນອງທາງວາຈາ ເປັນແນວນີ້ ນີ້ຊື່ວ່າຄວາມຄະນອງທາງວາຈາ

ຄວາມຄະນອງທາງໃຈ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ບໍ່ແມ່ນອອກບວດຈາກຕະກູນສູງ ກໍມີຈິດວາງຕົວເຊັ່ນດຽວກັບພິກຂຸຜູ້ອອກບວດຈາກຕະກູນສູງ ບໍ່ແມ່ນອອກບວດຈາກຕະກູນໃຫຍ່ ກໍມີຈິດວາງຕົວເຊັ່ນດຽວກັບພິກຂຸຜູ້ອອກບວດຈາກຕະກູນໃຫຍ່ ບໍ່ແມ່ນອອກບວດຈາກຕະກູນທີ່ມີໂພຄະສົມບັດ ຫຼາຍ ຯລຯ ບໍ່ແມ່ນອອກບວດຈາກຕະກູນທີ່ມີໂພຄະສົມບັດຍິ່ງໃຫຍ່ ຯລຯ ບໍ່ແມ່ນເປັນຜູ້ຊົງຈຳພຣະສູດ ຯລຯ ບໍ່ແມ່ນເປັນຜູ້ຊົງຈຳພຣະວິໄນ ຯລຯ ບໍ່ແມ່ນເປັນພຣະທຳມະກະຖຶກ ຯລຯ ບໍ່ແມ່ນເປັນຜູ້ຢູ່ປ່າເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ງົດອາຫານຄາບຫຼັງເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ຖືການນັ່ງເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ໄດ້ປະຖົມຊານກໍມີຈິດວາງຕົວເຊັ່ນດຽວກັບພິກຂຸຜູ້ໄດ້ປະຖົມຊານ ຯລຯ ບໍ່ແມ່ນເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ

ກໍມີຈິດວາງຕົວເຊັ່ນດຽວກັບພິກຂຸຜູ້ໄດ້ ເນວະສັນຍານາສັນຍາຍະຕະນະສະມາບັດ ນີ້ຊື່ວ່າຄວາມຄະນອງທາງໃຈ

ຄວາມຄະນອງ ໓ ຢ່າງນີ້ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ບໍ່ ຄະນອງ ລວມຄວາມວ່າ ຜູ້ບໍ່ຄະນອງ

## ວ່າດ້ວຍຜູ້ໜ້າຮັງກຽດແລະບໍ່ໜ້າຮັງກຽດ

ຄຳວ່າ ບໍ່ເປັນທີ່ໜ້າຮັງກຽດ ໄດ້ແກ່ ບຸກຄົນຜູ້ໜ້າຮັງກຽດກໍມີ ບຸກຄົນຜູ້ບໍ່ໜ້າຮັງກຽດກໍມີ

ບຸກຄົນຜູ້ໜ້າຮັງກຽດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ທຸສີນ ຖືຄວາມຊົ່ວເປັນເລື້ອງທຳມະດາ ມີຄວາມປະພຶດບໍ່ສະອາດທີ່ນຶກເຖິງໄດ້ດ້ວຍຄວາມໜ້າຮັງກຽດ ມີການງານທີ່ປົກປິດ ບໍ່ໄດ້ເປັນສະມະນະກໍປະຕິຍານວ່າເປັນສະມະນະ ບໍ່ໄດ້ປະພຶດພົມມະຈັນກໍປະຕິຍານວ່າປະພຶດພົມມະຈັນ ເປັນຄົນເນົ່າພາຍໃນ ມີໃຈຊຸ່ມໂຊກດ້ວຍຄວາມກຳໜັດ ເປັນຄືຂີ້ເຫຍື້ອ ນີ້ຕັດຮຽກວ່າ ບຸກຄົນຜູ້ໜ້າຮັງກຽດ

ອີກໄນໜຶ່ງ ເຂົາເປັນຄົນມັກໂກດ ຫຼາຍໄປດ້ວຍຄວາມແຄ້ນເຄືອງ ຖືກໃຜວ່າໜ້ອຍໜຶ່ງກໍຂັດໃຈ ຄຽດ ພະຍາບາດ ມຸ້ງຮ້າຍ ທຳຄວາມໂກດ ຄວາມແຄ້ນເຄືອງ ແລະຄວາມບໍ່ຍິນດີໃຫ້ຜາກົດສະເໜີ ນີ້ຕັດຮຽກວ່າ ບຸກຄົນຜູ້ໜ້າຮັງກຽດ

ອີກໄນໜຶ່ງ ເຂົາເປັນຄົນມັກໂກດ ຜູກໂກດ ລົບຫຼູ່ ຕີສະເໝີ ຣິດສະຫຍາ ຂີ້ຖີ່ ໂອ້ອວດ ຫຼອກລວງ ກະດ້າງ ຖືຕົວ ມີຄວາມຢາກທີ່ຊົ່ວຊາມ ມີຄວາມເຫັນຜິດ ຖືຄວາມຄິດເຫັນຂອງຕົນເອງເປັນໃຫຍ່ ຖືຮັ້ນ ປ່ຽນຄວາມຄິດເຫັນໄດ້ຍາກ ນີ້ຕັດຮຽກວ່າ ບຸກຄົນຜູ້ໜ້າຮັງກຽດ

ບຸກຄົນຜູ້ບໍ່ໜ້າຮັງກຽດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ສົມບູນດ້ວຍອາຈາຣະແລະໂຄຈອນ ແນມເຫັນໄພໃນໂທດແມ່ນພຽງເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ຕັດຮຽກວ່າ ບຸກຄົນຜູ້ບໍ່ໜ້າຮັງກຽດ

ອີກໄນໜຶ່ງ ທ່ານເປັນຄົນບໍ່ມັກໂກດ ບໍ່ຫຼາຍໄປດ້ວຍຄວາມແຄ້ນເຄືອງ ແມ່ນຖືກໃຜວ່າກ່າວແມ່ນຫຼາຍ ກໍບໍ່ຂັດໃຈ ບໍ່ຄຽດ ບໍ່ພະຍາບາດ ບໍ່ມຸ້ງຮ້າຍ ບໍ່ເຮັດຄວາມໂກດ ຄວາມແຄ້ນເຄືອງ ແລະຄວາມບໍ່ຍິນດີໃຫ້ຜາກົດ ນີ້ຕັດຮຽກວ່າ ບຸກຄົນຜູ້ບໍ່ໜ້າຮັງກຽດ

ອີກໄນໜຶ່ງ ທ່ານເປັນຄົນບໍ່ມັກໂກດ ບໍ່ຜູກໂກດ ບໍ່ລົບຫຼູ່ ບໍ່ຕີສະເໝີ ບໍ່ຣິດສະຫຍາ ບໍ່ຂີ້ຖີ່ ບໍ່ໂອ້ອວດ ບໍ່ຫຼອກລວງ ບໍ່ແຂງກະດ້າງ ບໍ່ຖືຕົວ ບໍ່ມີຄວາມຢາກທີ່ຊົ່ວຊາມ ບໍ່ມີຄວາມເຫັນຜິດ ບໍ່ຖືຄວາມຄິດເຫັນຂອງຕົນເອງເປັນໃຫຍ່ ບໍ່ຖືຮັ້ນ ປ່ຽນຄວາມຄິດເຫັນງ່າຍ ນີ້ຕັດຮຽກວ່າ ບຸກຄົນຜູ້ບໍ່ໜ້າຮັງກຽດ ພຣະອະຣິຍະບຸກຄົນທຸກປະເພດ ລວມທັງກັນລະຍານະປຸຖຸຊົນ ເປັນບຸກຄົນຜູ້ບໍ່ໜ້າຮັງກຽດ ລວມຄວາມວ່າ ຜູ້ບໍ່ຄະນອງ ບໍ່ເປັນທີ່ໜ້າຮັງກຽດ

## ວ່າດ້ວຍຜູ້ມີວາຈາສັບສໍ່

ຄຳວ່າ ແລະບໍ່ປະກອບໃນຄວາມເປັນຜູ້ມີວາຈາສັບສໍ່ ອະທິບາຍວ່າ

ຄຳວ່າ ຄວາມເປັນຜູ້ມີວາຈາສັບສໍ່ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ ເປັນຜູ້ມີ ວາຈາສັບສໍ່ ຟັງຈາກຂ້າງນີ້ແລ້ວໄປບອກຄົນຂ້າງນັ້ນເພື່ອທຳລາຍຄົນໝູ່ນີ້ ຫຼື ຟັງຈາກຂ້າງນັ້ນແລ້ວມາບອກຄົນຂ້າງນີ້ເພື່ອທຳລາຍຄົນໝູ່ນັ້ນ ດ້ວຍວິທີນີ້ ກໍເຮັດຄົນທີ່ສາມັກຄີໃຫ້ແຕກແຍກ ຫຼື ສະໜັບສະໜູນຜູ້ທີ່ແຕກແຍກກັນແລ້ວ ມັກການແບ່ງພວກແບ່ງເຫຼົ່າ ຍິນດີການແບ່ງພວກແບ່ງເຫຼົ່າ ຍິນດີກັບການແບ່ງພວກແບ່ງເຫຼົ່າ ເວົ້າແຕ່ເລື້ອງກໍ່ໃຫ້ເກີດການແບ່ງພວກແບ່ງເຫຼົ່າ ນີ້ຕັດຮຽກວ່າ ຄວາມເປັນຜູ້ມີວາຈາສັບສໍ່

ອີກໄນໜຶ່ງ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍເຫດ ໒ ຢ່າງ ຄື

໑. ດ້ວຍປະສົງໃຫ້ຕົນເປັນທີ່ຮັກ
໒. ດ້ວຍປະສົງໃຫ້ເຂົາແຕກກັນກັນ

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍຄວາມປະສົງໃຫ້ຕົນເປັນທີ່ຮັກດ້ວຍ ຄິດວ່າ ເຮົາຈັກເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ຄຸ້ນເຄີຍ ເປັນທີ່ສະໜິດສະໜົມ ເປັນທີ່ດີໃຈຂອງຜູ້ນີ້ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວນີ້

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງຈະເຮັດໃຫ້ເຂົາແຕກກັນ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍຄິດວ່າ ເຮັດແນວໃດ ຊົນເຫຼົ່ານີ້ເພິ່ງເປັນ ຄົນແປກແຍກ ແຕກຕ່າງ ເປັນພັກເປັນເຫຼົ່າ ເປັນ ໔ ພວກ ເປັນ ໔ ຝັກ ໔ ຝ່າຍ ແຕກແຍກ ບໍ່ປອງດອງກັນ ຢູ່ລຳບາກ ບໍ່ສະບາຍ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງຈະໃຫ້ເຂົາແຕກກັນ ເປັນແນວນີ້

ວາຈາສັບສໍ່ນີ້ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຊື່ວ່າບໍ່ປະກອບ ຄື ບໍ່ກ່ຽວຂ້ອງ ບໍ່ຂວນຂວາຍ ບໍ່ພົວພັນໃນຄວາມເປັນຜູ້ມີວາຈາສັບສໍ່ ລວມຄວາມວ່າ ແລະບໍ່ປະກອບໃນຄວາມເປັນຜູ້ມີວາຈາສັບສໍ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ບຸກຄົນເປັນຜູ້ຫຼົບຫຼີກ ບໍ່ຫຼອກລວງ ບໍ່ທະເຍີທະຍານ ບໍ່ຂີ້ຄີ່ ບໍ່ຄະນອງ ບໍ່ເປັນທີ່ໜ້າຣັງກຽດ ແລະບໍ່ປະກອບໃນຄວາມເປັນຜູ້ມີວາຈາສັບສໍ່

[໗໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນຜູ້ບໍ່ຍິນດີໃນສິ່ງໜ້າຍິນດີ
ບໍ່ປະກອບໃນຄວາມດູໝິ່ນ ລະອຽດອ່ອນ ມີປະຕິພານ
ບໍ່ຕ້ອງເຊື່ອໃຜ ແລະບໍ່ຕ້ອງຄາຍກຳໜັດ

## ວ່າດ້ວຍກາມມະຄຸນ ໕

ຄຳວ່າ ບໍ່ຍິນດີໃນສິ່ງໜ້າຍິນດີ ອະທິບາຍວ່າ ກາມມະຄຸນ ໕ ຕັດຮຽກວ່າ ສິ່ງໜ້າ ຍິນດີ

ຍ້ອນເຫດໃດ ກາມມະຄຸນ ໕ ຈຶ່ງຕັດຮຽກວ່າ ສິ່ງໜ້າຍິນດີ ຍ້ອນໂດຍສ່ວນຫຼາຍ ເທວະດາ ແລະມະນຸດທັງຫຼາຍ ຍ່ອມຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ກາມມະຄຸນ ໕ ຍ້ອນເຫດນັ້ນ ກາມມະຄຸນ ໕ ຈຶ່ງຕັດຮຽກວ່າ ສິ່ງໜ້າຍິນດີ

ສິ່ງທີ່ໜ້າຍິນດີ ຄື ຕັນຫານີ້ຊົນເຫຼົ່າໃດຍັງລະບໍ່ໄດ້ ຮູບຕັນຫາກໍຍ່ອມໄຫຼ ຫຼັ່ງໄຫຼ ຊ່ານໄປ ເປັນໄປທາງຕາຂອງຊົນເຫຼົ່ານັ້ນ ສັດທະຕັນຫາຍ່ອມໄຫຼ ฯລฯ ທາງຫູ ฯລฯ ຄັນທະຕັນຫາຍ່ອມໄຫຼ ฯລฯ ທາງດັງ ฯລฯ ຣະສະຕັນຫາຍ່ອມໄຫຼ ฯລฯ ທາງລີ້ນ ฯລฯ ໂຜດຖັບພະຕັນຫາຍ່ອມໄຫຼ ฯລฯ ທາງກາຍ ฯລฯ ທຳມະຕັນຫາກໍຍ່ອມໄຫຼ ຫຼັ່ງໄຫຼ ຊ່ານໄປ ເປັນໄປ ທາງມະໂນວິນຍານຂອງ ຊົນເຫຼົ່ານັ້ນ ສິ່ງໜ້າຍິນດີ ຄື ຕັນຫານີ້ຊົນເຫຼົ່າໃດລະໄດ້ແລ້ວ ຕັດຂາດໄດ້

ແລ້ວ ເຮັດໃຫ້ສະງົບ ໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟ ຄື ຍານແລ້ວ ຮູບຕັນຫາ ຍ່ອມບໍ່ໄຫຼ ບໍ່ຫຼັ່ງໄຫຼ ບໍ່ຊ່ານໄປ ບໍ່ເປັນໄປທາງຕາຂອງຊົນເຫຼົ່ານັ້ນ ສັດທະຕັນຫາ ຍ່ອມບໍ່ໄຫຼ ຯລຯ ທາງຫູ ຯລຯ ຄັນທະຕັນຫາຍ່ອມບໍ່ໄຫຼ ຯລຯ ທາງດັງ ຯລຯ ຣະສະຕັນຫາຍ່ອມບໍ່ໄຫຼ ຯລຯ ທາງລີ້ນ ຯລຯ ໂຜດຖັບພະຕັນຫາຍ່ອມບໍ່ໄຫຼ ຯລຯ ທາງກາຍ ຯລຯ ທຳມະຕັນຫາຍ່ອມບໍ່ໄຫຼ ບໍ່ຫຼັ່ງໄຫຼ ບໍ່ຊ່ານໄປ ບໍ່ເປັນໄປ ທາງມະໂນວິນຍານຂອງຊົນເຫຼົ່ານັ້ນ ລວມຄວາມວ່າ ບໍ່ຍິນດີໃນສິ່ງໜ້າຍິນດີ

## ວ່າດ້ວຍຄວາມດູໝິ່ນ

ຄຳວ່າ ບໍ່ປະກອບໃນຄວາມດູໝິ່ນ ອະທິບາຍວ່າ

ຄວາມດູໝິ່ນ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ດູໝິ່ນຜູ້ອື່ນຍ້ອນຊາດແດ່ ຍ້ອນໂຄດແດ່ ຯລຯ ຍ້ອນເລື້ອງອື່ນນອກຈາກທີ່ກ່າວແລ້ວແດ່ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເປັນຄືທຸງ ຄວາມເຫີ່ເຫີມ ຄວາມທີ່ຕ້ອງການ ເຊີດຊູຕົນເປັນຄືທຸງເຫັນປານນີ້ ນີ້ຕັດຮຽກວ່າ ຄວາມດູໝິ່ນ ຄວາມດູໝິ່ນນັ້ນ ຜູ້ໃດ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຊື່ວ່າ ບໍ່ປະກອບ ຄື ບໍ່ກ່ຽວຂ້ອງ ບໍ່ຂວນຂວາຍ ບໍ່ພົວພັນໃນຄວາມດູໝິ່ນ ລວມຄວາມວ່າ ບໍ່ປະກອບໃນຄວາມດູໝິ່ນ

ຄຳວ່າ ລະອຽດອ່ອນ ມີປະຕິພານ ອະທິບາຍວ່າ ຊື່ວ່າ ລະອຽດອ່ອນ ຍ້ອນປະກອບດ້ວຍກາຍຍະກຳອັນລະອຽດອ່ອນ ຯລຯ ວະຈີກຳອັນລະອຽດອ່ອນ ຯລຯ ມະໂນກຳອັນລະອຽດອ່ອນ ຯລຯ ສະຕິປັດຖານອັນລະອຽດອ່ອນ ຯລຯ ສຳມັບປະທານອັນລະອຽດອ່ອນ ຯລຯ ອິດທິບາດອັນລະອຽດອ່ອນ ຯລຯ ອິນຊີອັນລະອຽດອ່ອນ ຯລຯ ພະລະອັນລະອຽດອ່ອນ ຯລຯ ໂພດຊົງອັນລະອຽດອ່ອນ ຊື່ວ່າ ລະອຽດອ່ອນ ຍ້ອນປະກອບດ້ວຍອະຣິຍະມັກມີອົງ ໘ ອັນລະອຽດອ່ອນ

## ວ່າດ້ວຍຜູ້ມີປະຕິພານ ໓ ຈຳພວກ

ຄຳວ່າ ມີປະຕິພານ ອະທິບາຍວ່າ ບຸກຄົນຜູ້ມີປະຕິພານ ໓ ຈຳພວກ ຄື

໑. ບຸກຄົນຜູ້ມີປະຕິພານຍ້ອນປະຣິຍັດ

໒. ບຸກຄົນຜູ້ມີປະຕິພານຍ້ອນປະຣິປຸດສາ

໓. ບຸກຄົນຜູ້ມີປະຕິພານຍ້ອນອະທິຄະມະ

ບຸກຄົນຜູ້ມີປະຕິພານຍ້ອນປະຣິຍັດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ໄດ້ຮ່ຳຮຽນພຣະພຸດທະພົດ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະຍານະ (ຄວາມຮູ້) ຂອງບຸກຄົນນັ້ນຍ່ອມແຈ່ມແຈ້ງ ຍ້ອນອາໄສການຮ່ຳຮຽນ ບຸກຄົນນີ້ຊື່ວ່າຜູ້ມີປະຕິພານຍ້ອນປະຣິຍັດ

ບຸກຄົນຜູ້ມີປະຕິພານຍ້ອນປະຣິປຸດສາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ເປັນຜູ້ໄຕ່ສວນໃນປະໂຫຍດຂອງຕົນ ໃນຄວາມໝາຍທີ່ຄວນຮູ້ ໃນລັກສະນະ ໃນເຫດ ໃນຖານະແລະອະຖານະ ຍານຂອງເຂົາຍ່ອມແຈ່ມແຈ້ງຍ້ອນການໄຕ່ສວນນັ້ນ ບຸກຄົນນີ້ຊື່ວ່າຜູ້ມີປະຕິພານຍ້ອນປະຣິປຸດສາ

ບຸກຄົນຜູ້ມີປະຕິພານຍ້ອນອະທິຄະມະ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ໄດ້ບັນລຸສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ອະຣິຍະມັກ ໔ ສາມັນຍະຜົນ ໔ ປະຕິສຳພິທາ ໔ ອະພິນຍາ ໖ ບຸກຄົນນັ້ນຮູ້ເຫດ ຮູ້ຜົນ ຮູ້ນິຣຸດຕິ ເມື່ອຮູ້ເຫດ ເຫດກໍແຈ່ມແຈ້ງ ເມື່ອຮູ້ຜົນ ຜົນກໍແຈ່ມແຈ້ງ ເມື່ອຮູ້ນິຣຸດຕິ ນິຣຸດຕິກໍແຈ່ມແຈ້ງ ຍານໃນເຫດ ຜົນ ແລະນິຣຸດຕິທັງ ໓ ເຫຼົ່ານີ້ ຊື່ວ່າ ປະຕິພານປະຕິສຳພິທາ ຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍປະຕິພານປະຕິສຳພິທານີ້ ບຸກຄົນນັ້ນຕັດຮຽກວ່າຜູ້ມີປະຕິພານ

ຖ້າຜູ້ໃດບໍ່ມີປະຣິຍັດ ບໍ່ມີປະຣິປຸດສາ ບໍ່ມີອະທິຄະມະ ຍານອັນໃດນໍ ຈັກແຈ່ມແຈ້ງແກ່ເຂົາໄດ້ ລວມຄວາມວ່າ ລະອຽດອ່ອນ ມີປະຕິພານ

## ວ່າດ້ວຍຮູ້ທຳແລ້ວບໍ່ຕ້ອງເຊື່ອໃຜອີກ

ຄຳວ່າ ບໍ່ຕ້ອງເຊື່ອໃຜ ໃນຄຳວ່າ ບໍ່ຕ້ອງເຊື່ອໃຜ ບໍ່ຕ້ອງຄາຍກຳໜັດ ອະທິບາຍວ່າ ທຳທີ່ຕົນຮູ້ຍິ່ງ ເຫັນຈິງດ້ວຍຕົນເອງແລ້ວ ບຸກຄົນບໍ່ຕ້ອງເຊື່ອໃຜອື່ນ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ຫຼື ພົມກໍຕາມ ຄື ທຳທີ່ຕົນຮູ້ຍິ່ງ ເຫັນຈິງດ້ວຍຕົນເອງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ບຸກຄົນນັ້ນບໍ່ຕ້ອງເຊື່ອໃຜອື່ນ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ຫຼື ພົມກໍຕາມ ຄື ທຳທີ່ຕົນຮູ້ຍິ່ງ ເຫັນຈິງດ້ວຍຕົນເອງແລ້ວວ່າ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຍ້ອນອະວິດຊາເປັນປັດໄຈສັງຂານຈຶ່ງມີ ຯລຯ ຍ້ອນຊາດເປັນປັດໄຈຊະຣາມໍຣະນະຈຶ່ງມີ ຯລຯ ຍ້ອນອະວິດຊາດັບສັງຂານຈຶ່ງດັບ ຯລຯ ຍ້ອນຊາດດັບ ຊະຣາມໍຣະນະຈຶ່ງດັບ ຯລຯ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ຯລຯ ເຫຼົ່ານີ້ອາສະວະ ຯລຯ ນີ້ອາສະວະນິໂຣທະຄາມີນີປະຕິປະທາ ຯລຯ ທຳເຫຼົ່ານີ້ຄວນຮູ້ແຈ້ງ ຯລຯ ທຳເຫຼົ່ານີ້ຄວນເຮັດໃຫ້ແຈ້ງ ຯລຯ ເຫດເກີດ ເຫດດັບ ຄຸນ ໂທດແລະການສະລັດອອກແຫ່ງຜັດສາຍະຕະນະ

໖ ໆລໆ ເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດອອກແຫ່ງອຸປາທານຂັນ ໕ ໆລໆ ເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດອອກແຫ່ງມະຫາພູຕະຮູບ ໔ ໆລໆ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທໍາມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທໍາມະດາ ບຸກຄົນນັ້ນບໍ່ຕ້ອງເຊື່ອໃຜອື່ນ ບໍ່ວ່າຈະເປັນສະມະນະ ພາມ ເທວະດາ ມານ ຫຼື ພົມກໍຕາມ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສາລີບຸດ ທ່ານເຊື່ອບໍວ່າ ສັດທິນຊີ ທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະທໍາ ມີອະມະຕະທໍາເປັນທີ່ໄປໃນເບື້ອງໜ້າ ມີອະມະຕະທໍາເປັນບ່ອນສຸດ ໆລໆ ວິຣິຍິນຊີ ໆລໆ ສະຕິນຊີ ໆລໆ ສະມາທິນຊີ ໆລໆ ປັນຍິນຊີ ທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະທໍາ ມີອະມະຕະທໍາເປັນທີ່ໄປໃນເບື້ອງໜ້າ ມີອະມະຕະທໍາເປັນບ່ອນສຸດ

ທ່ານພຣະສາຣີບຸດຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໃນຂໍ້ນີ້ຂ້າພຣະອົງບໍ່ຈໍາຕ້ອງດໍາເນີນໄປດ້ວຍຄວາມເຊື່ອຕໍ່ພຣະຜູ້ມີພຣະພາກເຈົ້າເລີຍວ່າ ສັດທິນຊີ ໆລໆ ວິຣິຍິນຊີ ໆລໆ ສັດຕິນຊີ ໆລໆ ສະມາທິນຊີ ໆລໆ ປັນຍິນຊີ ທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະທໍາ ມີອະມະຕະທໍາເປັນທີ່ໄປໃນເບື້ອງໜ້າ ມີອະມະຕະທໍາເປັນບ່ອນສຸດ ຂ້າແດ່ພຣະອົງຜູ້ຈະເລີນ ຂໍ້ນີ້ ຊົນເຫຼົ່າໃດ ບໍ່ຮູ້ ບໍ່ເຫັນ ບໍ່ເຂົ້າໃຈ ບໍ່ໄດ້ເຮັດໃຫ້ແຈ້ງ ບໍ່ໄດ້ສໍາຜັດດ້ວຍປັນຍາແລ້ວ ຊົນເຫຼົ່ານັ້ນ ເພິ່ງຕ້ອງເຖິງຄວາມເຊື່ອຕໍ່ຜູ້ອື່ນໃນຂໍ້ນັ້ນວ່າ ສັດທິນຊີ ໆລໆ ປັນຍິນຊີ ທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະທໍາ ມີອະມະຕະທໍາເປັນທີ່ໄປໃນເບື້ອງໜ້າ ມີອະມະຕະທໍາເປັນບ່ອນສຸດ ຂ້າແດ່ພຣະອົງຜູ້ຈະເລີນ ຂໍ້ນີ້ ຊົນເຫຼົ່າໃດ ຮູ້ ເຫັນ ເຂົ້າໃຈ ເຮັດໃຫ້ແຈ້ງ ສໍາຜັດດ້ວຍປັນຍາແລ້ວ ຊົນເຫຼົ່ານັ້ນ ຍ່ອມບໍ່ມີຄວາມສົງໄສ ບໍ່ມີຄວາມແຄງໃຈໃນຂໍ້ນັ້ນເລີຍວ່າ ສັດທິນຊີ ໆລໆ ວິຣິຍິນຊີ ໆລໆ ສະຕິນຊີ ໆລໆ ສະມາທິນຊີ ໆລໆ ປັນຍິນຊີ ທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ ອະມະຕະທໍາ ມີອະມະຕະທໍາເປັນທີ່ໄປໃນເບື້ອງໜ້າ ມີອະມະຕະທໍາເປັນບ່ອນສຸດ

ຂ້າແດ່ພຣະອົງຜູ້ຈະເລີນ ຂໍ້ນີ້ຂ້າພຣະອົງຮູ້ ເຫັນ ເຂົ້າໃຈ ເຮັດໃຫ້ແຈ້ງ ສໍາຜັດ ດ້ວຍປັນຍາແລ້ວ ຂ້າພຣະອົງບໍ່ມີຄວາມສົງໄສ ບໍ່ມີຄວາມແຄງໃຈໃນຂໍ້ນັ້ນເລີຍວ່າ ສັດທິນຊີ ໆລໆ ວິຣິຍິນຊີ ໆລໆ ສະຕິນຊີ ໆລໆ ສະມາທິນຊີ ໆລໆ ປັນຍິນຊີທີ່ບຸກຄົນ ຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະທໍາ ມີອະມະຕະທໍາເປັນທີ່ໄປໃນເບື້ອງໜ້າ ມີອະມະຕະທໍາເປັນບ່ອນສຸດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ດີແລ້ວ ສາຣີບຸດ ຂໍ້ນີ້ ຊົນເຫຼົ່າໃດ ບໍ່ຮູ້ ບໍ່ເຫັນ ບໍ່ເຂົ້າໃຈ ບໍ່ໄດ້ເຮັດໃຫ້ແຈ້ງ ບໍ່ໄດ້ສໍາຜັດດ້ວຍປັນຍາແລ້ວ ຊົນເຫຼົ່ານັ້ນ ເພິ່ງຕ້ອງດໍາເນີນໄປດ້ວຍຄວາມເຊື່ອຕໍ່ຜູ້ອື່ນໃນຂໍ້ນັ້ນວ່າ ສັດທິນຊີ ໆລໆ ປັນຍິນຊີ ທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍ

ແລ້ວ ຍ່ອມຢັ່ງລົງສູ່ອະມະຕະທຳ ມີອະມະຕະທຳເປັນທີ່ໄປໃນເບື້ອງໜ້າ ມີອະມະຕະທຳ ເປັນບ່ອນສຸດ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປວ່າ)

ນໍຣະຊົນໃດຜູ້ບໍ່ຕ້ອງເຊື່ອໃຜ
ຮູ້ຈັກນິບພານທີ່ປັດໄຈອັນໃດປຸງແຕ່ງບໍ່ໄດ້
ຕັດຮອຍຕໍ່ແຫ່ງການເກີດໃໝ່
ທຳລາຍໂຄຈອນແຫ່ງການທ່ອງທ່ຽວໄປໃນສົງສານ
ຄາຍຄວາມຫວັງແລ້ວ ນໍຣະຊົນນັ້ນແລ ເປັນບຸຣຸດສູງສຸດ

## ວ່າດ້ວຍຜູ້ບໍ່ຄາຍກຳໜັດ

ຄຳວ່າ ບໍ່ຕ້ອງເຊື່ອໃຜ ແລະບໍ່ຕ້ອງຄາຍກຳໜັດ ອະທິບາຍວ່າ ພານປຸຖຸຊົນ ທັງໝົດຍ່ອມກຳໜັດ ພຣະເສຂະ ໆ ຈຳພວກ ລວມທັງກັນລະຍານະປຸຖຸຊົນ ຍ່ອມຄາຍກຳໜັດ ພຣະອະຣະຫັນຍ່ອມບໍ່ກຳໜັດ ຈຶ່ງບໍ່ຕ້ອງຄາຍກຳໜັດ ພຣະອະຣະຫັນຊື່ວ່າຜູ້ງົດເວັ້ນ ຍ້ອນໝົດສິ້ນຣາຄະແລ້ວ ຍ້ອນໝົດສິ້ນໂທສະແລ້ວ ຍ້ອນໝົດສິ້ນໂມຫະແລ້ວ ທ່ານຢູ່ໃນ (ອະຣິຍະວາສະທຳ) ແລ້ວປະພຶດຈະຣະນະທຳແລ້ວ ຯລຯ ພຣະອະຣະຫັນບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ບໍ່ຕ້ອງເຊື່ອໃຜ ແລະບໍ່ຕ້ອງຄາຍກຳໜັດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນຜູ້ບໍ່ຍິນດີໃນສິ່ງໜ້າຍິນດີ
ບໍ່ປະກອບໃນຄວາມດູໝິ່ນ ລະອຽດອ່ອນ ມີປະຕິພານ
ບໍ່ຕ້ອງເຊື່ອໃຜ ແລະບໍ່ຕ້ອງຄາຍກຳໜັດ

[໘໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນບໍ່ສຶກສາຍ້ອນຢາກໄດ້ລາບ
ບໍ່ໂກດຍ້ອນບໍ່ໄດ້ລາບ ບໍ່ເດືອດດານ
ແລະບໍ່ຍິນດີໃນຣົດຍ້ອນຕັນຫາ

## ວ່າດ້ວຍສຶກສາຍ້ອນຢາກໄດ້ລາບ

ຄຳວ່າ ບຸກຄົນບໍ່ສຶກສາຍ້ອນຢາກໄດ້ລາບ ບໍ່ໂກດຍ້ອນບໍ່ໄດ້ລາບ ອະທິບາຍວ່າ

ບຸກຄົນສຶກສາຍ້ອນຢາກໄດ້ລາບ ເປັນແນວໃດ?

ຄື ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເຫັນພິກຂຸໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານຄິດແນວນີ້ວ່າ ຍ້ອນເຫດໃດນໍ ທ່ານຜູ້ມີອາຍຸນີ້ ຈຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານຄິດຕໍ່ໄປວ່າ ທ່ານຜູ້ມີອາຍຸນີ້ເປັນຜູ້ຊົງຈຳພຣະສູດ ຍ້ອນເຫດນັ້ນ ທ່ານຈຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານຫວັງລາບ ຈຶ່ງຮ່ຳຮຽນພຣະສູດ ຍ້ອນລາບເປັນເຫດ ຍ້ອນລາບເປັນປັດໄຈ ຍ້ອນລາບເປັນຕົ້ນເຫດ ຍ້ອນມຸ້ງຫວັງການເກີດລາບໂດຍສະເພາະ ບຸກຄົນຊື່ວ່າສຶກສາຍ້ອນຢາກໄດ້ລາບ ເປັນແນວນີ້

ອີກໄນໜຶ່ງ ພິກຂຸເຫັນພິກຂຸໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານຄິດແນວນີ້ວ່າ ຍ້ອນເຫດໃດນໍ ທ່ານຜູ້ມີອາຍຸນີ້ ຈຶ່ງໄດ້ຈີວອນ ບິນທະ ບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານມີຄວາມຄິດຕໍ່ໄປວ່າ ທ່ານຜູ້ມີ ອາຍຸນີ້ເປັນຜູ້ຊົງຈຳພຣະວິໄນ ຯລຯ ຜູ້ຊົງຈຳພຣະອະພິທຳ ຍ້ອນເຫດນັ້ນ ທ່ານຈຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານມຸ້ງຫວັງລາບ ຈຶ່ງຮ່ຳຮຽນ ຯລຯ ພຣະອະພິທຳ ຍ້ອນລາບເປັນເຫດ ຍ້ອນລາບເປັນປັດໄຈ ຍ້ອນລາບເປັນຕົ້ນເຫດ ຍ້ອນມຸ້ງຫວັງການເກີດລາບໂດຍສະເພາະ ບຸກຄົນຊື່ວ່າສຶກສາຍ້ອນຢາກໄດ້ລາບ ເປັນແນວນີ້

ອີກໄນໜຶ່ງ ພິກຂຸເຫັນພິກຂຸໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານມີຄວາມຄິດແນວນີ້ວ່າ ຍ້ອນເຫດໃດນໍ ທ່ານຜູ້ມີອາຍຸນີ້ຈຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານມີຄວາມຄິດຕໍ່ໄປວ່າ ທ່ານຜູ້ມີອາຍຸນີ້ ເປັນຜູ້ຖືການຢູ່ປ່າເປັນຂໍ້ວັດ ຯລຯ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດ ຯລຯ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດ ຯລຯ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດ ຯລຯ ເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດ ຯລຯ ເປັນຜູ້ງົດສັນອາຫານຄາບຫຼັງເປັນຂໍ້ວັດ ຯລຯ ເປັນຜູ້ຖືການນັ່ງເປັນຂໍ້ວັດ ຯລຯ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດ ຍ້ອນເຫດນັ້ນ ທ່ານຈຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ທ່ານມຸ້ງຫວັງລາບ ຈຶ່ງເປັນຜູ້ຖືການຢູ່ປ່າເປັນຂໍ້ວັດ ຯລຯ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດ ຍ້ອນລາບເປັນເຫດ ຍ້ອນລາບເປັນປັດໄຈ ຍ້ອນລາບເປັນຕົ້ນເຫດ ຍ້ອນມຸ້ງຫວັງການເກີດລາບໂດຍສະເພາະ ບຸກຄົນຊື່ວ່າສຶກສາຍ້ອນຢາກໄດ້ລາບ ເປັນແນວນີ້

ບຸກຄົນບໍ່ສຶກສາຍ້ອນຢາກໄດ້ລາບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ໄດ້ມຸ້ງຫວັງລາບ ຮ່ຳຮຽນພຣະສູດ ຮ່ຳຮຽນພຣະວິໄນ ຮ່ຳຮຽນພຣະອະພິທຳ ເພື່ອປະໂຫຍດໃນການເຝິກຕົນ ເພື່ອປະໂຫຍດແກ່ຄວາມສະງົບຂອງຕົນ ເພື່ອປະໂຫຍດໃນການເຮັດຕົນໃຫ້ດັບເຢັນ (ປະຣິນິບພານ) ບໍ່ແມ່ນຍ້ອນລາບເປັນເຫດ ບໍ່ແມ່ນ ຍ້ອນ

ລາບເປັນປັດໄຈ ບໍ່ແມ່ນຍ້ອນລາບເປັນຕົ້ນເຫດ ບໍ່ແມ່ນຍ້ອນມຸ້ງຫວັງການເກີດລາບໂດຍສະເພາະ ບຸກຄົນຊື່ວ່າບໍ່ສຶກສາຍ້ອນຢາກໄດ້ລາບ ເປັນແນວນີ້

ອີກໄນໜຶ່ງ ພິກຂຸບໍ່ມຸ້ງຫວັງລາບ ພຽງອາໄສຄວາມປາຖະໜານ້ອຍ ຄວາມສັນໂດດ ຄວາມຂັດເກົາກິເລດ ຄວາມສະຫງັດ ຄວາມເປັນຜູ້ຕ້ອງການກຸສົນນີ້ຢ່າງດຽວເທົ່ານັ້ນ ຈຶ່ງເປັນ ຜູ້ຖືການຢູ່ປ່າເປັນຂໍ້ວັດ ໆລໆ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດ ໆລໆ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດ ໆລໆ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດ ໆລໆ ເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດ ໆລໆ ເປັນຜູ້ງົດອາຫານຄາບຫຼັງເປັນຂໍ້ວັດ ໆລໆ ເປັນຜູ້ຖືການນັ່ງເປັນຂໍ້ວັດ ໆລໆ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດ ບໍ່ແມ່ນຍ້ອນລາບເປັນເຫດ ບໍ່ແມ່ນຍ້ອນລາບເປັນປັດໄຈ ບໍ່ແມ່ນຍ້ອນລາບເປັນຕົ້ນເຫດ ບໍ່ແມ່ນຍ້ອນມຸ້ງຫວັງການເກີດລາບໂດຍສະເພາະ ບຸກຄົນ ຊື່ວ່າບໍ່ສຶກສາຍ້ອນຢາກໄດ້ລາບ ເປັນແນວນີ້ ລວມຄວາມວ່າ ບຸກຄົນບໍ່ສຶກສາຍ້ອນ ຢາກໄດ້ລາບ

## ວ່າດ້ວຍໂກດຍ້ອນການບໍ່ໄດ້

ຄຳວ່າ ບໍ່ໂກດຍ້ອນບໍ່ໄດ້ລາບ ອະທິບາຍ ວ່າ

ພິກຂຸໂກດຍ້ອນບໍ່ໄດ້ລາບ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຍັງໂກດ ຄື ແຄ້ນ ເຄືອງ ທຳຄວາມໂກດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈໃຫ້ຜາກົດວ່າ ເຮົາບໍ່ໄດ້ຕະກູນ ໝູ່ຄະນະ ອາວາດ ລາບ ຍົດ ສັນເສີນສຸກ ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ຫຼື ຜູ້ປິ່ນປົວຍາມອາພາດ ເຮົາບໍ່ມີຊື່ສຽງທີ່ຄົນຮູ້ຈັກ ບຸກຄົນຊື່ວ່າໂກດຍ້ອນບໍ່ໄດ້ລາບ ເປັນແນວນີ້

ພິກຂຸບໍ່ໂກດຍ້ອນບໍ່ໄດ້ລາບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ໂກດ ຄື ບໍ່ແຄ້ນ ບໍ່ເຄືອງ ບໍ່ເຮັດຄວາມໂກດ ຄວາມຂັດເຄືອງ ແລະຄວາມບໍ່ພໍໃຈໃຫ້ຜາກົດວ່າ ເຮົາບໍ່ໄດ້ຕະກູນ ໝູ່ຄະນະ ອາວາດ ລາບ ຍົດ ສັນເສີນ ສຸກ ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ຫຼື ຜູ້ປິ່ນປົວຍາມອາພາດ ເຮົາບໍ່ມີຊື່ສຽງທີ່ຄົນຮູ້ຈັກ ບຸກຄົນຊື່ວ່າບໍ່ໂກດຍ້ອນບໍ່ໄດ້ລາບ ເປັນແນວນີ້ ລວມຄວາມວ່າ ບຸກຄົນບໍ່ສຶກສາຍ້ອນຢາກໄດ້ລາບ ບໍ່ໂກດຍ້ອນບໍ່ໄດ້ລາບ

ຄຳວ່າ ເດືອດດານ ໃນຄຳວ່າ ບໍ່ເດືອດດານ ແລະບໍ່ຍິນດີໃນຣົດຍ້ອນຕັນຫາ ໄດ້ແກ່ ໃຈປອງຮ້າຍ ມຸ້ງຮ້າຍ ຂັດເຄືອງ ຂຸ່ນເຄືອງ ແຄ້ນເຄືອງ ເຄືອງ ເຄືອງຫຼາຍ ເຄືອງຕະຫຼອດ ຊັງຊິງຊັງ ກຽດຊັງ ໃຈພະຍາບາດ ໃຈແຄ້ນເຄືອງ ຄວາມໂກດ ກິຣິຍາທີ່ໂກດ ພາວະ ທີ່ໂກດຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມໂກດ ຄວາມແຄ້ນ ຄວາມດຸຮ້າຍ

ຄວາມຮຸນແຮງ ຄວາມບໍ່ຊ້ອຍຊື່ນແຫ່ງຈິດເຫັນປານນີ້ ນີ້ຮຽກວ່າ ຄວາມເດືອດດານ ຄວາມເດືອດດານນັ້ນ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ບໍ່ເດືອດດານ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ຣົດ ໄດ້ແກ່ ຣົດຈາກຮາກ ຣົດຈາກລຳຕົ້ນ ຣົດຈາກເປືອກ ຣົດຈາກໃບ ຣົດຈາກດອກ ຣົດຈາກຜົນ ຣົດສົ້ມ ຣົດຫວານ ຣົດຂົມ ຣົດເຜັດ ຣົດເຄັມ ຣົດຊ່າ ຣົດເຝື່ອນ ຣົດຝາດ ຣົດແຊບ ຣົດບໍ່ແຊບ ຣົດເຢັນ ຣົດຮ້ອນ ສະມະນະພາມບາງພວກ ຍິນດີໃນຣົດ ສະມະນະພາມເຫຼົ່ານັ້ນທ່ຽວສະແຫວງຫາຣົດເລີດດ້ວຍປາຍລີ້ນ ໄດ້ຣົດສົ້ມແລ້ວກໍສະແຫວງຫາຣົດບໍ່ສົ້ມ ໄດ້ຣົດບໍ່ສົ້ມແລ້ວກໍສະແຫວງຫາຣົດສົ້ມ ໄດ້ຣົດຫວານແລ້ວກໍສະແຫວງຫາຣົດບໍ່ຫວານ ໄດ້ຣົດບໍ່ຫວານແລ້ວກໍສະແຫວງຫາຣົດຫວານ ໄດ້ຣົດຂົມແລ້ວກໍສະແຫວງຫາຣົດບໍ່ຂົມ ໄດ້ຣົດບໍ່ຂົມແລ້ວກໍສະແຫວງຫາຣົດຂົມ ໄດ້ຣົດເຜັດແລ້ວກໍສະແຫວງຫາຣົດບໍ່ເຜັດ ໄດ້ຣົດບໍ່ເຜັດແລ້ວກໍສະແຫວງຫາຣົດເຜັດ ໄດ້ຣົດເຄັມແລ້ວກໍສະແຫວງຫາຣົດບໍ່ເຄັມ ໄດ້ຣົດບໍ່ເຄັມແລ້ວກໍສະແຫວງຫາຣົດເຄັມ ໄດ້ຣົດຊ່າແລ້ວກໍສະແຫວງຫາຣົດບໍ່ຊ່າ ໄດ້ຣົດບໍ່ຊ່າແລ້ວກໍສະແຫວງຫາຣົດຊ່າ ໄດ້ຣົດສົ້ມແລ້ວກໍສະແຫວງຫາຣົດຝາດ ໄດ້ຣົດຝາດແລ້ວກໍສະແຫວງຫາ ຣົດສົ້ມ ໄດ້ຣົດແຊບແລ້ວກໍສະແຫວງຫາຣົດບໍ່ແຊບ ໄດ້ຣົດບໍ່ແຊບແລ້ວກໍສະແຫວງຫາຣົດແຊບ ໄດ້ຂອງເຢັນແລ້ວກໍສະແຫວງຫາຂອງຮ້ອນ ໄດ້ຂອງຮ້ອນແລ້ວກໍສະແຫວງຫາຂອງເຢັນສະມະນະພາມເຫຼົ່ານັ້ນໄດ້ຣົດໃດ ໆ ແລ້ວກໍບໍ່ຍິນດີດ້ວຍຣົດນັ້ນ ໆ ຍັງສະແຫວງຫາຣົດອື່ນ ໆ ຕໍ່ໄປອີກ ເປັນຜູ້ກຳໜັດ ຍິນດີ ຕິດໃຈ ສະຍົບມົກມຸ້ນ ເກາະຕິດ ກ່ຽວພັນ ພົວພັນໃນຣົດທີ່ພໍໃຈ ຕັນຫາໃນຣົດນີ້ພິກຂຸໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ພິກຂຸນັ້ນພິຈາລະນາແລ້ວໂດຍແຍບຄາຍ ຈຶ່ງສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອຕົບແຕ່ງ ບໍ່ແມ່ນເພື່ອປະດັບ ແຕ່ເຮົາພຽງເພື່ອໃຫ້ຮ່າງກາຍນີ້ດຳຣົງຢູ່ ເພື່ອໃຫ້ຮ່າງກາຍນີ້ ດຳເນີນໄປໄດ້ ເພື່ອຣະງັບຄວາມລຳບາກ ເພື່ອອະນຸເຄາະພົມມະຈັນຢ່າງດຽວເທົ່ານັ້ນ ດ້ວຍມະນະສິການວ່າ ເຮົາຈັກບຳບັດ ເວທະນາເກົ່າ ບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ການດຳເນີນຊີວິດຂອງເຮົາ ຄວາມບໍ່ມີໂທດແລະຢູ່ສະບາຍໄດ້ດ້ວຍວິທີການແນວນີ້

ຄົນທາບາດພຽງເພື່ອປູກຊີ້ນອ່ອນ ຕ້ອງການເພົາລົດພຽງເພື່ອຈະຂົນພາຣະໄປ ຫຼື ກິນອາຫານທີ່ປຸງຈາກຊີ້ນບຸດຕົນ ພຽງເພື່ອຈະເດີນທາງອອກຈາກທາງກັນດານໃຫ້ພົ້ນເທົ່ານັ້ນສັນໃດ ພິກຂຸກໍສັນນັ້ນຄືກັນ ພິຈາລະນາໂດຍແຍບຄາຍແລ້ວ ສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອຕົບແຕ່ງ ບໍ່ແມ່ນເພື່ອປະດັບ ແຕ່ສັນພຽງເພື່ອຈະໃຫ້ຮ່າງກາຍນີ້ດຳຣົງຢູ່ ເພື່ອໃຫ້ຮ່າງກາຍນີ້ດຳເນີນໄປໄດ້ ເພື່ອຣະງັບຄວາມລຳບາກ ເພື່ອອະນຸເຄາະພົມມະຈັນ

ເທົ່ານັ້ນ ດ້ວຍມະນະສິການວ່າ ເຮົາຈັກບຳບັດເວທະນາເກົ່າ ບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ການດຳເນີນຊີວິດຂອງເຮົາ ຄວາມບໍ່ມີໂທດແລະຢູ່ສະບາຍໄດ້ດ້ວຍວິທີການແນວນີ້ ຍ່ອມລະບັນເທົາເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຕັນຫາໃນຣົດ ເປັນຜູ້ງົດແລ້ວ ງົດເວັ້ນແລ້ວ ເວັ້ນຂາດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງກັບຕັນຫາໃນຣົດແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເດືອດດານ ແລະບໍ່ຍິນດີໃນຣົດຍ້ອນ ຕັນຫາດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

บຸກຄົນບໍ່ສຶກສາຍ້ອນຢາກໄດ້ລາບ
ບໍ່ໂກດຍ້ອນບໍ່ໄດ້ລາບ ບໍ່ເດືອດດານ
ແລະບໍ່ຍິນດີໃນຣົດຍ້ອນຕັນຫາ

[໙໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນເປັນຜູ້ວາງເສີຍ ມີສະຕິທຸກເມື່ອ
ບໍ່ສຳຄັນວ່າສະເໝີເຂົາ ບໍ່ສຳຄັນວ່າເລີດກວ່າເຂົາ
ບໍ່ສຳຄັນວ່າດ້ອຍກວ່າເຂົາ ໃນໂລກ
ກິເລດໜາຍ່ອມບໍ່ມີແກ່ບຸກຄົນນັ້ນ

## ວ່າດ້ວຍອຸເປກຂາມີອົງ ໖

ຄຳວ່າ ບຸກຄົນເປັນຜູ້ວາງເສີຍ ໃນຄຳວ່າ ບຸກຄົນເປັນຜູ້ວາງເສີຍ ມີສະຕິທຸກເມື່ອ ອະທິບາຍວ່າ ບຸກຄົນເປັນຜູ້ປະກອບດ້ວຍອຸເປກຂາມີອົງ ໖ ເຫັນຮູບທາງຕາແລ້ວ ກໍບໍ່ດີໃຈ ບໍ່ເສຍໃຈ ເປັນຜູ້ວາງເສີຍ ມີສະຕິສຳປະຊັນຍະຢູ່ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ກໍບໍ່ດີໃຈ ບໍ່ເສຍໃຈ ເປັນຜູ້ວາງເສີຍ ມີສະຕິສຳປະຊັນຍະຢູ່ ເຫັນຮູບທາງຕາແລ້ວ ບໍ່ຕິດໃຈ ບໍ່ຍິນດີຮູບທີ່ໜ້າພໍໃຈ ບໍ່ໃຫ້ເກີດຄວາມກຳໜັດ ກາຍຂອງເຂົາຕັ້ງໝັ້ນ ຈິດກໍຕັ້ງໝັ້ນ ດຳຣົງດີຢູ່ພາຍໃນ ຫຼຸດພົ້ນດີແລ້ວ ທັງເຫັນຮູບທີ່ບໍ່ພໍໃຈທາງຕາແລ້ວກໍບໍ່ເສຍໃຈ ບໍ່ໂກດ ບໍ່ຫົດຫູ່ ບໍ່ພະຍາບາດ ກາຍຂອງເຂົາຕັ້ງໝັ້ນ ຈິດກໍຕັ້ງໝັ້ນ ດຳຣົງດີຢູ່ພາຍໃນ ຫຼຸດພົ້ນດີແລ້ວ ໄດ້ຍິນສຽງທາງຫູແລ້ວ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ກໍບໍ່ຕິດໃຈ ບໍ່ຍິນດີອາລົມທີ່ໜ້າພໍໃຈ ບໍ່ໃຫ້ເກີດຄວາມກຳໜັດຂຶ້ນ ກາຍຂອງເຂົາຕັ້ງໝັ້ນ ຈິດກໍຕັ້ງໝັ້ນ ດຳຣົງດີຢູ່ພາຍໃນ ຫຼຸດພົ້ນດີແລ້ວ ທັງຮູ້ທຳມາຣົມທີ່ບໍ່ໜ້າພໍໃຈທາງໃຈແລ້ວ ກໍບໍ່ເສຍໃຈ ບໍ່ໂກດ ບໍ່ຫົດຫູ່ ບໍ່ພະຍາບາດ ກາຍຂອງເຂົາຕັ້ງໝັ້ນ ຈິດກໍຕັ້ງໝັ້ນ ດຳຣົງດີຢູ່ພາຍໃນຫຼຸດພົ້ນດີແລ້ວ

ເຫັນຮູບທາງຕາແລ້ວ ກາຍຂອງເຂົາກໍຕັ້ງໝັ້ນໃນຮູບທີ່ພໍໃຈແລະບໍ່ພໍໃຈ ຈິດກໍຕັ້ງໝັ້ນ ດໍາຣົງດີຢູ່ພາຍໃນ ຫຼຸດພົ້ນດີແລ້ວ ຟັງສຽງທາງຫູແລ້ວ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທໍາມາຣົມທາງໃຈແລ້ວ ກໍມີກາຍຕັ້ງໝັ້ນໃນທໍາມາຣົມທັງທີ່ພໍໃຈແລະບໍ່ພໍໃຈ ຈິດກໍຕັ້ງໝັ້ນ ດໍາຣົງດີຢູ່ພາຍໃນ ຫຼຸດພົ້ນດີແລ້ວ

ເຫັນຮູບທາງຕາແລ້ວ ກໍບໍ່ກໍາໜັດໃນຮູບທີ່ຊວນໃຫ້ກໍາໜັດ ບໍ່ຂັດເຄືອງໃນຮູບທີ່ຊວນໃຫ້ຂັດເຄືອງ ບໍ່ຫຼົງໃນຮູບທີ່ຊວນໃຫ້ຫຼົງ ບໍ່ໂກດໃນຮູບທີ່ຊວນໃຫ້ໂກດ ບໍ່ເສົ້າໝອງໃນຮູບທີ່ຊວນໃຫ້ເສົ້າໝອງ ບໍ່ມົວເມົາໃນຮູບທີ່ຊວນໃຫ້ມົວເມົາ ໄດ້ຍິນສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທໍາມາຣົມທາງໃຈແລ້ວ ກໍບໍ່ກໍາໜັດໃນທໍາມາຣົມທີ່ຊວນໃຫ້ກໍາໜັດ ບໍ່ຂັດເຄືອງໃນທໍາມາຣົມທີ່ຊວນໃຫ້ຂັດເຄືອງ ບໍ່ຫຼົງໃນທໍາມາຣົມທີ່ຊວນໃຫ້ຫຼົງ ບໍ່ໂກດໃນທໍາມາຣົມທີ່ຊວນໃຫ້ໂກດ ບໍ່ເສົ້າໝອງໃນທໍາມາຣົມທີ່ຊວນໃຫ້ເສົ້າໝອງ ບໍ່ມົວເມົາໃນທໍາມາຣົມທີ່ຊວນໃຫ້ມົວເມົາ ເມື່ອເຫັນ ກໍເປັນພຽງເຫັນ ເມື່ອໄດ້ຍິນ ກໍເປັນພຽງໄດ້ຍິນ ເມື່ອຮັບຮູ້ ກິ່ນ ຣົດ ໂຜດຖັບພະ ກໍເປັນພຽງຮັບຮູ້ ເມື່ອຮູ້ແຈ້ງທໍາມາຣົມ ກໍເປັນພຽງຮູ້ແຈ້ງ ບໍ່ຕິດໃນຮູບທີ່ເຫັນ ບໍ່ຕິດໃນສຽງທີ່ໄດ້ຍິນ ບໍ່ຕິດໃນກິ່ນ ບໍ່ຕິດໃນຣົດ ບໍ່ຕິດໃນສໍາຜັດທີ່ຮັບຮູ້ ບໍ່ຕິດ ໃນທໍາມາຣົມທີ່ຮູ້ແຈ້ງແລ້ວ ບໍ່ມີຕັນຫາ ບໍ່ມີໃຈປະທຸດສະຮ້າຍ ຕັນຫາແລະທິດຖິບໍ່ອາໄສ ບໍ່ພົວພັນ ພົ້ນຂາດ ບໍ່ກ່ຽວຂ້ອງໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທໍາມາຣົມທີ່ຮູ້ແຈ້ງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່

ພຣະອະຣະຫັນກໍມີຕາ ເຫັນຮູບທາງຕາ ແຕ່ພຣະອະຣະຫັນບໍ່ມີຄວາມກໍາໜັດຍ້ອນພໍໃຈ ພຣະອະຣະຫັນຈຶ່ງມີຈິດຫຼຸດພົ້ນດີແລ້ວ ພຣະອະຣະຫັນກໍມີຫູ ໄດ້ຍິນສຽງທາງຫູ ແຕ່ ພຣະອະຣະຫັນບໍ່ມີຄວາມກໍາໜັດຍ້ອນພໍໃຈ ພຣະອະຣະຫັນຈຶ່ງມີຈິດຫຼຸດພົ້ນດີແລ້ວ ພຣະ ອະຣະຫັນກໍມີດັງ ໄດ້ກິ່ນທາງດັງ ແຕ່ພຣະອະຣະຫັນບໍ່ມີຄວາມກໍາໜັດຍ້ອນພໍໃຈ ພຣະອະຣະຫັນຈຶ່ງມີຈິດຫຼຸດພົ້ນດີແລ້ວ ພຣະອະຣະຫັນກໍມີລີ້ນ ຊີມຣົດທາງລີ້ນ ແຕ່ພຣະອະຣະຫັນບໍ່ມີຄວາມກໍາໜັດຍ້ອນພໍໃຈ ພຣະອະຣະຫັນຈຶ່ງມີຈິດຫຼຸດພົ້ນດີແລ້ວ ພຣະອະຣະຫັນກໍມີກາຍຖືກຕ້ອງໂຜດຖັບພະທາງກາຍ ແຕ່ພຣະອະຣະຫັນບໍ່ມີຄວາມກໍາໜັດຍ້ອນພໍໃຈ ພຣະອະຣະຫັນຈຶ່ງມີຈິດຫຼຸດພົ້ນດີແລ້ວ ພຣະອະຣະຫັນກໍມີໃຈ ຮູ້ທໍາມາຣົມທາງໃຈ ແຕ່ພຣະອະຣະຫັນບໍ່ມີຄວາມກໍາໜັດ ຍ້ອນພໍໃຈ ພຣະອະຣະຫັນຈຶ່ງມີຈິດຫຼຸດພົ້ນດີແລ້ວ

ຕາເຫັນຮູບ ຍິນດີໃນຮູບ ຊື່ນຊົມໃນຮູບ ພຣະອະຣະຫັນເຝິກ ຄຸ້ມຄອງ ຮັກສາ ສັງລວມຕາ ແລະສະແດງທໍາເພື່ອສັງລວມຕານັ້ນ ຫູຟັງສຽງ ຯລຯ ດັງໄດ້ກິ່ນ ຯລຯ ລີ້ນຊີມຣົດ ຯລຯ ກາຍຖືກຕ້ອງໂຜດຖັບພະ ຯລຯ ໃຈສໍາຜັດທໍາມາຣົມ ຍິນດີໃນທໍາມາຣົມ ຊື່ນຊົມໃນທໍາມາຣົມ ພຣະອະຣະຫັນເຝິກ ຄຸ້ມຄອງ ຮັກສາ ສັງລວມໃຈ ແລະສະແດງທໍາ ເພື່ອການສັງລວມໃຈນັ້ນ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ຄົນທັງຫຼາຍນຳສັດພາຫະນະທີ່ເຝິກແລ້ວໄປສູ່ທີ່ປະຊຸມ
ພຣະຣາຊາຍ່ອມຊົງຣາດຊະພາຫະນະທີ່ເຝິກແລ້ວ
ໃນໝູ່ມະນຸດ ຄົນທີ່ເຝິກແລ້ວ ເຊິ່ງອົດກັ້ນຕໍ່ຄຳລ່ວງເກີນໄດ້ ປະເສີດສຸດ
ມ້າອັດສະດອນ ມ້າອາຊາໄນ ມ້າສິນທົບ ຊ້າງໃຫຍ່
ທີ່ໄດ້ຮັບການເຝິກຫັດແລ້ວ ປະເສີດ
ແຕ່ຄົນທີ່ເຝິກຫັດແລ້ວ ປະເສີດກວ່າສັດພາຫະນະເຫຼົ່ານັ້ນ
ຍ້ອນໃຜກໍໄປເຖິງນິບພານອັນເປັນທິດທີ່ບໍ່ເຄີຍໄປ
ດ້ວຍຍານພາຫະນະເຫຼົ່ານັ້ນບໍ່ໄດ້ ເໝືອນບຸກຄົນຜູ້ເຝິກແລ້ວ
ມີຕົນເຝິກຫັດແລ້ວຢ່າງດີ ໄປເຖິງໄດ້
ພຣະອະຣະຫັນທັງຫຼາຍ ຫຼຸດພົ້ນຈາກພົບໃໝ່ແລ້ວ
ບັນລຸເຖິງພູມທີ່ເຝິກແລ້ວ ຍ່ອມບໍ່ຫວັ່ນໄຫວໃນມານະທັງຫຼາຍ
ທ່ານເປັນຜູ້ຊະນະແລ້ວໃນໂລກ
ຜູ້ໃດອົບຮົມອິນຊີແລ້ວໃນໂລກທັງປວງ ທັງພາຍໃນແລະພາຍນອກ
ຜູ້ນັ້ນເປັນຜູ້ອົບຮົມແລ້ວ ເຝິກດີແລ້ວ ຮູ້ແຈ້ງທັງໂລກນີ້ແລະປະຣະໂລກ
ລໍຄອຍຢູ່ແຕ່ເວລາເທົ່ານັ້ນ

ຄຳວ່າ ບຸກຄົນເປັນຜູ້ວາງເສີຍ ฯລฯ ທຸກເມື່ອ ອະທິບາຍວ່າ ທຸກເມື່ອ ຄື ໃນການທັງປວງ ຕະຫຼອດການທັງປວງ ຕະຫຼອດການເປັນນິດ ຕະຫຼອດການຍັ່ງຍືນ ฯລฯ ປັດສົມໄວ

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
໒. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
໓. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
໔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ

ຜູ້ນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ມີສະຕິ ລວມຄວາມວ່າ ບຸກຄົນເປັນຜູ້ວາງເສີຍ ມີສະຕິທຸກເມື່ອ

ຄຳວ່າ ບໍ່ສຳຄັນວ່າສະເໝີເຂົາ ฯລฯ ໃນໂລກ ອະທິບາຍວ່າ ບໍ່ໃຫ້ເກີດຄວາມຖືຕົວຍ້ອນ ຊາດ ຍ້ອນໂຄດ ฯລฯ ຫຼືຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວວ່າ ເຮົາເປັນຜູ້ສະເໝີເຂົາ ລວມຄວາມວ່າ ບໍ່ສຳຄັນວ່າສະເໝີເຂົາ ฯລฯ ໃນໂລກ

ຄຳວ່າ ບໍ່ສຳຄັນວ່າເລີດກວ່າເຂົາ ບໍ່ສຳຄັນວ່າດ້ອຍກວ່າເຂົາ ອະທິບາຍວ່າ ບໍ່ໃຫ້ເກີດຄວາມດູໝິ່ນ ຍ້ອນຊາດ ຍ້ອນໂຄດ ຯລຯ ຫຼື ຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວວ່າ ເຮົາເລີດກວ່າເຂົາ ບໍ່ໃຫ້ເກີດຄວາມຖືຕົວ ຍ້ອນຊາດ ຍ້ອນໂຄດ ຯລຯ ຫຼື ຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວວ່າ ເຮົາດ້ອຍກວ່າເຂົາ ລວມຄວາມວ່າ ບໍ່ສຳຄັນວ່າເລີດກວ່າເຂົາ ບໍ່ສຳຄັນວ່າດ້ອຍກວ່າເຂົາ

## ວ່າດ້ວຍກິເລດໜາ ໗ ຢ່າງ

ຄຳວ່າ ບຸກຄົນນັ້ນ ໃນຄຳວ່າ ກິເລດໜາຍ່ອມບໍ່ມີແກ່ບຸກຄົນນັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ກິເລດໜາ ໄດ້ແກ່ ກິເລດໜາ ໗ ຢ່າງ ຄື

໑. ກິເລດໜາຄືຣາຄະ
໒. ກິເລດໜາຄືໂທສະ
໓. ກິເລດໜາຄືໂມຫະ
໔. ກິເລດໜາຄືມານະ
໕. ກິເລດໜາຄືທິດຖິ
໖. ກິເລດໜາຄືກິເລດ
໗. ກິເລດໜາຄືກຳ

ກິເລດໜາເຫຼົ່ານັ້ນບໍ່ມີ ບໍ່ມີຢູ່ ຄື ບໍ່ຜາກົດ ຫາບໍ່ໄດ້ແກ່ພຣະອະຣະຫັນນັ້ນ ຄື ກິເລດໜາເຫຼົ່ານັ້ນພຣະອະຣະຫັນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ກິເລດໜາຍ່ອມບໍ່ມີແກ່ບຸກຄົນນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນເປັນຜູ້ວາງເສີຍ ມີສະຕິທຸກເມື່ອ
ບໍ່ສຳຄັນວ່າສະເໝີເຂົາ ບໍ່ສຳຄັນວ່າເລີດກວ່າເຂົາ
ບໍ່ສຳຄັນວ່າດ້ອຍກວ່າເຂົາ ໃນໂລກ
ກິເລດໜາຍ່ອມບໍ່ມີແກ່ບຸກຄົນນັ້ນ

[໙໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນໃດບໍ່ມີບ່ອນອາໄສ
ບໍ່ມີຕັນຫາໃນພົບຫຼືໃນວິພົບ
ບຸກຄົນນັ້ນຮູ້ທຳແລ້ວບໍ່ອາໄສ

## ວ່າດ້ວຍບ່ອນອາໄສ

ຄຳວ່າ ບຸກຄົນໃດ ໃນຄຳວ່າ ບຸກຄົນໃດບໍ່ມີບ່ອນອາໄສ ໄດ້ແກ່ພຣະອະຣະຫັນຕະຂີນາສົບ

ຄຳວ່າ ບ່ອນອາໄສ ໄດ້ແກ່ ຄວາມອາໄສ ໒ ຢ່າງ ຄື (໑) ຄວາມອາໄສດ້ວຍອຳນາດຕັນຫາ (໒) ຄວາມອາໄສດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າ ຄວາມອາໄສດ້ວຍອຳນາດທິດຖິ

ບຸກຄົນນັ້ນລະຄວາມອາໄສດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມອາໄສດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມອາໄສດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມ ອາໄສດ້ວຍອຳນາດທິດຖິໄດ້ແລ້ວ ບຸກຄົນໃດ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເຊິ່ງບ່ອນອາໄສ ຄື ບ່ອນອາໄສນັ້ນ ບຸກຄົນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ບຸກຄົນໃດບໍ່ມີບ່ອນອາໄສ

ຄຳວ່າ ຮູ້ແລ້ວ ໃນຄຳວ່າ ຮູ້ທຳແລ້ວບໍ່ອາໄສ ອະທິບາຍວ່າ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ບໍ່ອາໄສ ໄດ້ແກ່ ຄວາມອາໄສ ໒ ຢ່າງ ຄື (໑) ຄວາມອາໄສດ້ວຍອຳນາດຕັນຫາ (໒) ຄວາມອາໄສດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດທິດຖິ

ບຸກຄົນນັ້ນລະຄວາມອາໄສດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມອາໄສດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ອາໄສຕາ ຯລຯ ບໍ່ອາໄສຫູ ຯລຯ ບໍ່ອາໄສດັງ ຯລຯ ບໍ່ອາໄສລີ້ນ ຯລຯ ບໍ່ອາໄສກາຍ ຯລຯ ບໍ່ອາໄສໃຈ ຯລຯ ຄື ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ບໍ່ຕິດໃຈແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງກັບຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ທຳມາຣົມ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ຮູບທີ່ເຫັນສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ມີໃຈເປັນອິດສະຫຼະ (ຈາກກິ ເລດ) ຢູ່ ລວມຄວາມວ່າ ຮູ້ທຳແລ້ວບໍ່ອາໄສ

## ວ່າດ້ວຍຕັນຫາ

ຄຳວ່າ ຕັນຫາ ໃນຄຳວ່າ ບໍ່ມີຕັນຫາໃນພົບຫຼືໃນວິພົບ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ບຸກຄົນໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ໃນພົບ ໄດ້ແກ່ ໃນພະວະທິດຖິ

ຄຳວ່າ ໃນວິພົບ ໄດ້ແກ່ ໃນວິພະວະທິດຖິ

ຄຳວ່າ ໃນພົບ ໄດ້ແກ່ ໃນສັດສະຕະທິດຖິ

ຄຳວ່າ ໃນວິພົບ ໄດ້ແກ່ ໃນອຸດເສທະທິດຖິ

ຄຳວ່າ ໃນພົບ ອະທິບາຍວ່າ ໃນພົບຕໍ່ໄປ ໃນຄະຕິຕໍ່ໄປ ໃນການຖືກຳເນີດຕໍ່ໄປໃນປະຕິສົນທິຕໍ່ໄປ ໃນຄວາມບັງເກີດຂອງອັດຕະພາບຕໍ່ໄປ

ຕັນຫາບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ບຸກຄົນໃດ ຄື ຕັນຫານັ້ນ ບຸກຄົນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ບໍ່ມີຕັນຫາໃນພົບຫຼືໃນວິພົບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນໃດບໍ່ມີບ່ອນອາໄສ
ບໍ່ມີຕັນຫາໃນພົບຫຼືໃນວິພົບ
ບຸກຄົນນັ້ນຮູ້ທຳແລ້ວບໍ່ອາໄສ

[໗໒] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຮົາຮຽກບຸກຄົນນັ້ນ ຜູ້ບໍ່ມຸ້ງຫວັງໃນການທັງຫຼາຍວ່າ
ເປັນຜູ້ເຂົ້າໄປສະງົບ ບຸກຄົນນັ້ນບໍ່ມີກິເລດເຄື່ອງຮ້ອຍຮັດ
ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໄດ້ແລ້ວ

ຄຳວ່າ ເຮົາຮຽກບຸກຄົນນັ້ນ ຯລຯ ເປັນຜູ້ເຂົ້າໄປສະງົບ ອະທິບາຍວ່າ ເຮົາຮຽກບຸກຄົນນັ້ນ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ບຸກຄົນນັ້ນວ່າ ເປັນຜູ້ສະງົບ ເຂົ້າໄປສະງົບ ສະງົບເຢັນ ຄືດັບແລ້ວ ຣະງັບແລ້ວ ລວມຄວາມວ່າ ເຮົາຮຽກບຸກຄົນນັ້ນ ຯລຯ ເປັນຜູ້ເຂົ້າໄປສະງົບ

ຄຳວ່າ ຜູ້ບໍ່ມຸ່ງຫວັງໃນການທັງຫຼາຍ ອະທິບາຍວ່າ

ຄຳວ່າ ການ ໄດ້ແກ່ ການ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸການ (໒) ກິເລດການ ຯລຯ ເຫຼົ່ານີ້ ຮຽກວ່າວັດຖຸການ ຯລຯ ເຫຼົ່ານີ້ ຮຽກວ່າກິເລດການ

ບຸກຄົນກຳນົດຮູ້ວັດຖຸການແລ້ວ ລະ ຄື ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດການ ຊື່ວ່າບໍ່ມຸ້ງຫວັງໃນການທັງຫຼາຍ ໄດ້ແກ່ ເປັນຜູ້ຄາຍການແລ້ວ ສະລະການແລ້ວ ຄາຍການແລ້ວ ປ່ອຍການແລ້ວ ລະການແລ້ວ ສະລັດຖິ້ມການແລ້ວ ຄື ເປັນຜູ້ຄາຍຄວາມກຳໜັດແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ໃນການທັງຫຼາຍ ເປັນຜູ້ໝົດຄວາມຢາກແລ້ວ ເປັນຜູ້ດັບແລ້ວ ເປັນຜູ້ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ຜູ້ບໍ່ມຸ້ງຫວັງ ໃນການທັງຫຼາຍ

## ວ່າດ້ວຍກິເລດເຄື່ອງຮ້ອຍຮັດ ໔ ຢ່າງ

ຄຳວ່າ ກິເລດເຄື່ອງຮ້ອຍຮັດ ໃນຄຳວ່າ ບຸກຄົນນັ້ນບໍ່ມີກິເລດເຄື່ອງຮ້ອຍຮັດ ອະທິບາຍວ່າ ກິເລດເຄື່ອງຮ້ອຍຮັດ ໔ ຢ່າງ ຄື

໑. ກິເລດເຄື່ອງຮ້ອຍຮັດກາຍຄືອະພິດຊາ
໒. ກິເລດເຄື່ອງຮ້ອຍຮັດກາຍຄືພະຍາບາດ
໓. ກິເລດເຄື່ອງຮ້ອຍຮັດກາຍຄືສີລັບພະຕະປະຣາມາດ
໔. ກິເລດເຄື່ອງຮ້ອຍຮັດກາຍຄືຄວາມຖືໝັ້ນວ່ານີ້ເທົ່ານັ້ນຈິງ

ຄວາມກຳໜັດໃນທິດຖິຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍຄືອະພິດຊາ ຄວາມ ອາຄາດ ຄວາມບໍ່ພໍໃຈໃນວາທະຂອງຜູ້ອື່ນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍຄືພະຍາບາດ ຄວາມຍຶດໝັ້ນສິນ ຂໍ້ວັດ ຫຼື ສິນແລະຂໍ້ວັດຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍຄື ສີລັບພະຕະປະຣາມາດ ທິດຖິຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍຄືອິທັງສັດຈາພິນິເວສະ

ຄຳວ່າ ບຸກຄົນນັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ບຸກຄົນນັ້ນບໍ່ມີກິເລດເຄື່ອງຮ້ອຍຮັດ ອະທິບາຍວ່າ ບຸກຄົນນັ້ນບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເຊິ່ງກິເລດເຄື່ອງຮ້ອຍຮັດ ຄື ກິເລດເຄື່ອງຮ້ອຍຮັດ ບຸກຄົນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ບຸກຄົນນັ້ນບໍ່ມີກິເລດເຄື່ອງຮ້ອຍຮັດ

## ວ່າດ້ວຍຕັນຫາມີຊື່ຕ່າງ ໆ

ຄຳວ່າ ບຸກຄົນນັ້ນ ຯລຯ ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໄດ້ແລ້ວ ອະທິບາຍວ່າ ຕັນຫາຕັດຮຽກວ່າ ວິສັດຕິກາ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນ ຄືໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍແນວໃດ ຕັນຫາຊື່ວ່າວິສັດຕິກາ ຍ້ອນຊ່ານໄປ ຊື່ວ່າວິສັດຕິກາ ຍ້ອນແຜ່ໄປ ຊື່ວ່າວິສັດຕິກາ ຍ້ອນກະຈາຍໄປ ຊື່ວ່າວິສັດຕິກາ ຍ້ອນບໍ່ສະໝ່ຳສະເໝີ ຊື່ວ່າວິສັດຕິກາ ຍ້ອນຄອບງຳ ຊື່ວ່າວິສັດຕິກາ ຍ້ອນສະທ້ອນໄປ ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ເວົ້າຜິດ ຊື່ວ່າ ວິສັດຕິກາ ຍ້ອນມີຮາກເປັນພິດ ຊື່ວ່າວິສັດຕິກາ ຍ້ອນມີຜົນເປັນພິດ ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ບໍຣິໂພກສິ່ງມີພິດ

ອີກໄນໜຶ່ງ ຕັນຫານັ້ນຊ່ານໄປ ແຜ່ໄປ ຂະຫຍາຍໄປໃນຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ຊ່ານໄປ

ແຜ່ໄປ ຂະຫຍາຍໄປໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ລວມຄວາມວ່າ ຕັນຫາທີ່ຊື່ວ່າວິສັດຕິກາ

ຄຳວ່າ ບຸກຄົນນັ້ນຂ້າມຕັນຫາທີ່ຊື່ວ່າວິສັດຕິກາໄດ້ແລ້ວ ອະທິບາຍວ່າ ບຸກຄົນນັ້ນ ຂ້າມໄດ້ແລ້ວ ຄື ຂ້າມໄປໄດ້ແລ້ວ ຂ້າມພົ້ນແລ້ວ ກ້າວລ່ວງແລ້ວ ລ່ວງເລີຍແລ້ວເຊິ່ງຕັນຫາ ທີ່ຊື່ວ່າວິສັດຕິການີ້ ລວມຄວາມວ່າ ບຸກຄົນນັ້ນຂ້າມຕັນຫາທີ່ຊື່ວ່າວິສັດຕິກາໄດ້ແລ້ວ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຮົາຮຽກບຸກຄົນນັ້ນ ຜູ້ບໍ່ມຸ້ງຫວັງໃນກາມທັງຫຼາຍວ່າ
ເປັນຜູ້ເຂົ້າໄປສະງົບ ບຸກຄົນນັ້ນບໍ່ມີກິເລດເຄື່ອງຮ້ອຍຮັດ
ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໄດ້ແລ້ວ

[໙໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນນັ້ນບໍ່ມີບຸດ ສັດລ້ຽງ ນາໄຮ່ແລະທີ່ດິນ
ທິດຖິວ່າມີອັດຕາ ຫຼືທິດຖິວ່າບໍ່ມີອັດຕາ ຫາບໍ່ໄດ້ໃນບຸກຄົນນັ້ນ

## ວ່າດ້ວຍບຸດເປັນຕົ້ນ

ຄຳວ່າ ບໍ່ ໃນຄຳວ່າ ບຸກຄົນນັ້ນ ບໍ່ມີບຸດ ສັດລ້ຽງ ນາໄຮ່ ແລະທີ່ດິນ ເປັນຄຳປະຕິເສດ
ຄຳວ່າ ບຸກຄົນນັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ
ຄຳວ່າ ບຸດ ໄດ້ແກ່ ບຸດ ໔ ຈຳພວກ ຄື

໑. ບຸດເກີດຈາກຕົນ
໒. ບຸດເກີດໃນເຂດ
໓. ບຸດທີ່ເຂົາໃຫ້
໔. ບຸດທີ່ຢູ່ໃນສຳນັກ

ຄຳວ່າ ສັດລ້ຽງ ໄດ້ແກ່ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ແລະ ລາ

ຄຳວ່າ ນາໄຮ່ ໄດ້ແກ່ ນາເຂົ້າສາລີ ນາເຂົ້າຈ້າວ ໄຮ່ຖົ່ວຂຽວ ໄຮ່ຖົ່ວແປບ ນາເຂົ້າໜຽວ ນາເຂົ້າລະມານ ໄຮ່ງາ

ຄຳວ່າ ທີ່ດິນ ໄດ້ແກ່ ທີ່ປຸກເຮືອນ ທີ່ສ້າງຍຸ້ງສາງ ທີ່ໜ້າເຮືອນ ທີ່ຫຼັງເຮືອນ ທີ່ສວນ ທີ່ຢູ່

ຄຳວ່າ ບຸກຄົນນັ້ນ ບໍ່ມີບຸດ ສັດລ້ຽງ ນາໄຮ່ແລະທີ່ດິນ ອະທິບາຍວ່າ ບຸກຄົນນັ້ນ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເຊິ່ງຄວາມຍຶດຖືວ່າມີບຸດ ຄວາມຍຶດຖືວ່າ ມີສັດລ້ຽງ ຄວາມຍຶດຖືວ່າມີນາໄຮ່ ຄວາມຍຶດຖືວ່າມີທີ່ດິນ ຄື ຄວາມຍຶດຖືວ່າ ມີບຸດເປັນຕົ້ນ ເຂົາລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ບຸກຄົນນັ້ນ ບໍ່ມີບຸດ ສັດລ້ຽງ ນາໄຮ່ແລະທີ່ດິນ

# ວ່າດ້ວຍທິດຖິ

ຄຳວ່າ ທິດຖິວ່າມີອັດຕາ ໃນຄຳວ່າ ທິດຖິວ່າມີອັດຕາ ຫຼື ທິດຖິວ່າບໍ່ມີອັດຕາ ຫາບໍ່ໄດ້ໃນບຸກຄົນນັ້ນ ໄດ້ແກ່ ບໍ່ມີສັດສະຕະທິດຖິ

ຄຳວ່າ ທິດຖິວ່າບໍ່ມີອັດຕາ ໄດ້ແກ່ ບໍ່ມີອຸດເສດທິດຖິ

ຄຳວ່າ ທິດຖິວ່າມີອັດຕາ ໄດ້ແກ່ ບໍ່ມີສິ່ງທີ່ຍຶດຖື

ຄຳວ່າ ທິດຖິວ່າບໍ່ມີອັດຕາ ໄດ້ແກ່ ບໍ່ມີສິ່ງທີ່ເພິ່ງປ່ອຍວາງ ອະທິບາຍວ່າ ສິ່ງທີ່ຍຶດຖື ບໍ່ມີແກ່ບຸກຄົນໃດ ສິ່ງທີ່ເພິ່ງປ່ອຍວາງກໍບໍ່ມີແກ່ບຸກຄົນນັ້ນ ສິ່ງທີ່ເພິ່ງປ່ອຍວາງບໍ່ມີແກ່ບຸກຄົນໃດ ສິ່ງທີ່ຍຶດຖືກໍບໍ່ມີແກ່ບຸກຄົນນັ້ນ ບຸກຄົນນັ້ນຜູ້ເປັນພຣະອະຣະຫັນ ກ້າວພົ້ນການຍຶດຖື ແລະການປ່ອຍວາງແລ້ວ ລ່ວງພົ້ນຄວາມຈະເລີນແລະຄວາມເສື່ອມແລ້ວ ບຸກຄົນນັ້ນ ຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ຯລຯ ບຸກຄົນນັ້ນ ບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ທິດຖິວ່າມີອັດຕາ ຫຼື ທິດຖິວ່າບໍ່ມີອັດຕາ ຫາບໍ່ໄດ້ໃນບຸກຄົນນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

> ບຸກຄົນນັ້ນ ບໍ່ມີບຸດ ສັດລ້ຽງ ນາໄຮ່ແລະທີ່ດິນ
> ທິດຖິວ່າມີອັດຕາ ຫຼື ທິດຖິວ່າບໍ່ມີອັດຕາ ຫາບໍ່ໄດ້ໃນບຸກຄົນນັ້ນ

[໙໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

> ເຫຼົ່າປຸຖຸຊົນຫຼືສະມະນະພາມ
> ເພິ່ງກ່າວຫາບຸກຄົນນັ້ນດ້ວຍໂທດໃດ
> ໂທດນັ້ນບໍ່ເຊີດຊູບຸກຄົນນັ້ນເລີຍ
> ຍ້ອນເຫດນັ້ນ ບຸກຄົນນັ້ນຈຶ່ງບໍ່ຫວັ່ນໄຫວຍ້ອນວາທະທັງຫຼາຍ

ຄຳວ່າ ເຫຼົ່າປຸຖຸຊົນ ໃນຄຳວ່າ ເຫຼົ່າປຸຖຸຊົນຫຼືສະມະນະພາມເພິ່ງກ່າວຫາບຸກຄົນນັ້ນດ້ວຍໂທດໃດ ອະທິບາຍວ່າ ຊື່ວ່າປຸຖຸຊົນ ຍ້ອນມີຄວາມໝາຍວ່າແນວໃດ?

ຊື່ວ່າປຸຖຸຊົນ ຍ້ອນໃຫ້ກິເລດຫຍາບເກີດຂຶ້ນ ຊື່ວ່າປຸຖຸຊົນ ຍ້ອນມີສັກກາຍະທິດຖິ ອັນໜາແໜ້ນຍັງລະບໍ່ໄດ້ ຊື່ວ່າປຸຖຸຊົນ ຍ້ອນປະຕິຍານຕໍ່ໜ້າສາດສະດາຫຼາຍອົງ ຊື່ວ່າປຸຖຸຊົນ ຍ້ອນຖືກຄະຕິທຸກຢ່າງຮ້ອຍຮັດໄວ້ຫຼາຍ ຊື່ວ່າປຸຖຸຊົນ ຍ້ອນປຸງແຕ່ງ ອະພິສັງຂານຕ່າງ ໆ ເປັນຈຳນວນຫຼາຍ ຊື່ວ່າປຸຖຸຊົນ ຍ້ອນຖືກໂອຄະກິເລດຕ່າງ ໆ ເປັນຈຳນວນຫຼາຍພັດພາໄປ ຊື່ວ່າປຸຖຸຊົນ ຍ້ອນເດືອດຮ້ອນດ້ວຍຄວາມເດືອດຮ້ອນຕ່າງ ໆ ເປັນຈຳນວນຫຼາຍ ຊື່ວ່າປຸຖຸຊົນ ຍ້ອນຖືກຄວາມຮ້ອນຮົນຕ່າງ ໆ ເປັນຈຳນວນຫຼາຍແຜດເຜົາ ຊື່ວ່າປຸຖຸຊົນ ຍ້ອນກຳໜັດ ຍິນດີ ຕິດໃຈ ສະຍົບ

ມີກາມຸ້ນ ເກາະຕິດ ກ່ຽວພັນ ພົວພັນໃນການມະຄຸນ ໕ ເປັນ ຈຳນວນຫຼາຍ ຊື່ວ່າປຸຖຸຊົນ ຍ້ອນຖືກນິວອນ ໕ ເປັນຈຳນວນຫຼາຍ ຫຸ້ມຫໍ່ ໂອບລ້ອມ ຫ້ອມລ້ອມ ຄອບຄຸມ ປົກຄຸມ ບົດບັງ

ຄຳວ່າ ສະມະນະ ໄດ້ແກ່ ຄົນພວກໜຶ່ງ ເປັນຜູ້ເຂົ້າເຖິງ ສົມບູນດ້ວຍການບວດ ພາຍນອກ ສາດສະໜານີ້

ຄຳວ່າ ພາມ ໄດ້ແກ່ ຄົນພວກໜຶ່ງ ຜູ້ອ້າງຕົວວ່າເປັນຜູ້ຈະເລີນ

ຄຳວ່າ ເຫຼົ່າປຸຖຸຊົນ ຫຼື ສະມະນະພາມເພິ່ງກ່າວຫາບຸກຄົນນັ້ນດ້ວຍໂທດໃດ ອະທິບາຍວ່າ ເຫຼົ່າປຸຖຸຊົນ ເພິ່ງກ່າວຫາບຸກຄົນນັ້ນດ້ວຍຣາຄະ ໂທສະ ໂມຫະ ມານະ ທິດຖິ ອຸດທັດຈະ ວິຈິກິດສາ ອະນຸໄສ ໃດ ໆ ວ່າ ເປັນຜູ້ກຳໜັດ ເປັນຜູ້ຂັດເຄືອງ ເປັນຜູ້ຫຼົງ ເປັນຜູ້ຍຶດຕິດ ເປັນຜູ້ຍຶດໝັ້ນ ເປັນຜູ້ຟຸ້ງຊ່ານ ເປັນຜູ້ລັງເລ ຫຼືເປັນຜູ້ຕົກຢູ່ໃນກຳລັງກິເລດ

ບຸກຄົນນັ້ນລະອະພິສັງຂານເຫຼົ່ານັ້ນໄດ້ແລ້ວ ຍ້ອນລະອະພິສັງຂານໄດ້ແລ້ວ ເຫຼົ່າປຸຖຸຊົນເພິ່ງກ່າວຫາບຸກຄົນນັ້ນໂດຍຄະຕິໃດວ່າ ເປັນຜູ້ເກີດໃນນະຣົກ ເປັນຜູ້ເກີດໃນກຳເນີດເດຍຣັດສານ ເປັນຜູ້ເກີດໃນເຜດວິໄສ ເປັນມະນຸດ ເປັນເທບ ເປັນຜູ້ມີຣູບ ເປັນຜູ້ບໍ່ມີຣູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼືເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບຸກຄົນນັ້ນບໍ່ມີເຫດ ບໍ່ມີປັດໄຈ ບໍ່ມີການ ທີ່ຈະໃຫ້ປຸຖຸຊົນເປັນຕົ້ນກ່າວຫາ ເວົ້າເຖິງ ເອີ່ຍເຖິງ ສະແດງເຖິງ ຊີ້ແຈ່ງເຖິງໄດ້ເລີຍ ລວມຄວາມວ່າ ເຫຼົ່າປຸຖຸຊົນຫຼືສະມະນະພາມເພິ່ງກ່າວຫາບຸກຄົນນັ້ນດ້ວຍ ໂທດໃດ

## ວ່າດ້ວຍການເຊີດຊູ ໒ ຢ່າງ

ຄຳວ່າ ບຸກຄົນນັ້ນ ໃນຄຳວ່າ ໂທດນັ້ນບໍ່ເຊີດຊູບຸກຄົນນັ້ນເລີຍ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ເຊີດຊູ ອະທິບາຍວ່າ ການເຊີດຊູ ໒ ຢ່າງ ຄື

໑. ການເຊີດຊູດ້ວຍອຳນາດຕັນຫາ

໒. ການເຊີດຊູດ້ວຍອຳນາດທິດຖິ ໆລໆ

ນີ້ຊື່ວ່າ ການເຊີດຊູດ້ວຍອຳນາດຕັນຫາ ໆລໆ ນີ້ຊື່ວ່າການເຊີດຊູດ້ວຍອຳນາດທິດຖິ ບຸກຄົນນັ້ນລະການເຊີດຊູດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມການເຊີດຊູດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະການເຊີດຊູດ້ວຍອຳນາດ ຕັນຫາ ສະລັດຖິ້ມການເຊີດຊູດ້ວຍອຳນາດທິດຖິໄດ້ແລ້ວ ບຸກຄົນນັ້ນຈຶ່ງບໍ່ທ່ຽວເຊີດຊູຕັນຫາຫຼືທິດຖິໄວ້ ຄື ບໍ່ມີຕັນຫາເປັນທຸງໄຊ ບໍ່ມີຕັນຫາເປັນຍອດທຸງ ບໍ່ມີຕັນຫາເປັນໃຫຍ່ ບໍ່ມີທິດຖິເປັນທຸງໄຊ ບໍ່ມີທິດຖິເປັນຍອດທຸງ ບໍ່ມີທິດຖິເປັນໃຫຍ່ ບໍ່ໄດ້ຖືກຕັນຫາຫຼືທິດຖິຄອບງຳທ່ຽວໄປ ລວມຄວາມວ່າ ໂທດນັ້ນ ບໍ່ເຊີດຊູບຸກຄົນນັ້ນເລີຍ

ຄຳວ່າ ຍ້ອນເຫດນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ບຸກຄົນຈຶ່ງບໍ່ຫວັ່ນໄຫວຍ້ອນ ວາທະທັງຫຼາຍ ອະທິບາຍວ່າ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນ

ເຫດນັ້ນ ບຸກຄົນນັ້ນຍ່ອມບໍ່ຫວັ່ນໄຫວ ຄື ບໍ່ໂຍກ ບໍ່ຄອນ ບໍ່ກະເພື່ອມ ບໍ່ສັ່ນ ບໍ່ສະທ້ານ ບໍ່ສະເທືອນ ຍ້ອນວາທະ ຄື ຍ້ອນການວ່າຮ້າຍ ນິນທາ ຕິຕຽນ ບໍ່ສັນເສີນ ບໍ່ຍ້ອງຍໍຄວາມດີ ລວມຄວາມວ່າ ຍ້ອນເຫດນັ້ນ ບຸກຄົນນັ້ນຈຶ່ງບໍ່ຫວັ່ນໄຫວຍ້ອນວາທະທັງຫຼາຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຫຼົ່າປຸຖຸຊົນຫຼືສະມະນະພາມ
ເພິ່ງກ່າວຫາບຸກຄົນນັ້ນດ້ວຍໂທດໃດ
ໂທດນັ້ນບໍ່ເຊີດຊູບຸກຄົນນັ້ນເລີຍ
ຍ້ອນເຫດນັ້ນ ບຸກຄົນນັ້ນຈຶ່ງບໍ່ຫວັ່ນໄຫວຍ້ອນວາທະທັງຫຼາຍ

[໘໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນຜູ້ເປັນມຸນີ ເປັນຜູ້ຄາຍຄວາມຍິນດີ
ບໍ່ຂີ້ຖີ່ ຍ່ອມບໍ່ກ່າວໃນເລື້ອງເລີດກວ່າເຂົາ
ບໍ່ກ່າວໃນເລື້ອງສະເໝີເຂົາ ບໍ່ກ່າວໃນເລື້ອງດ້ອຍກວ່າເຂົາ
ເປັນຜູ້ບໍ່ມີຄວາມກຳນົດ ຍ່ອມບໍ່ເຖິງຄວາມກຳນົດ

ຄຳວ່າ ເປັນຜູ້ຄາຍຄວາມຍິນດີ ບໍ່ຂີ້ຖີ່ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມຍິນດີ ຄືຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຄວາມຍິນດີນັ້ນ ບຸກຄົນໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ບຸກຄົນນັ້ນຕັດຮຽກວ່າ ຜູ້ຄາຍຄວາມຍິນດີ ຄື ຜູ້ນັ້ນບໍ່ຍິນດີ ບໍ່ຕິດໃຈ ບໍ່ສະຍົບ ບໍ່ມົກມຸ້ນໃນຮູບ ຯລຯ ໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ໄດ້ແກ່ ເປັນຜູ້ຄາຍ ຄວາມຍິນດີແລ້ວ ຄື ປາສະຈາກຄວາມຍິນດີແລ້ວ ສະລະຄວາມຍິນດີແລ້ວ ຄາຍຄວາມຍິນດີແລ້ວ ປ່ອຍຄວາມຍິນດີ ລະຄວາມຍິນດີແລ້ວ ສະລັດຖິ້ມຄວາມຍິນດີແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ເປັນຜູ້ດັບແລ້ວ ເປັນຜູ້ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ເປັນຜູ້ຄາຍຄວາມຍິນດີ

ຄຳວ່າ ບໍ່ຂີ້ຖີ່ ອະທິບາຍວ່າ

ຄຳວ່າ ຄວາມຂີ້ຖີ່ ໄດ້ແກ່ ມັດສະຣິຍະ ໕ ຢ່າງ ຄື

໑. ອາວາສະມັດສະຣິຍະ
໒. ລາພະມັດສະຣິຍະ
໕. ທຳມະມັດສະຣິຍະ
໔. ກຸລະມັດສະຣິຍະ
໔. ວັນນະມັດສະຣິຍະ

ຄວາມຂີ້ຖີ່ ໆລໆ ຄວາມມຸ້ງແຕ່ຈະໄດ້ເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຂີ້ຖີ່ ຄວາມຂີ້ຖີ່ ນັ້ນບຸກຄົນໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ບຸກຄົນນັ້ນຕັດຮຽກວ່າ ຜູ້ບໍ່ຂີ້ຖີ່ ລວມຄວາມວ່າ ເປັນຜູ້ຄາຍຄວາມຍິນດີ ບໍ່ຂີ້ຖີ່

ຄຳວ່າ ມຸນີ ໃນຄຳວ່າ ບຸກຄົນຜູ້ເປັນມຸນີ ໆລໆ ຍ່ອມບໍ່ກ່າວໃນເລື້ອງເລີດກວ່າເຂົາບໍ່ກ່າວໃນເລື້ອງສະເໝີເຂົາ ບໍ່ກ່າວໃນເລື້ອງດ້ອຍກວ່າເຂົາ ອະທິບາຍວ່າ ຍານ ທ່ານ ຮຽກວ່າ ໂມນະ ໆລໆ ຜູ້ກ້າວລ່ວງກິເລດເປັນເຄື່ອງຂ້ອງ ແລະຕັນຫາເປັນຄືຕາໜ່າງໄດ້ແລ້ວ ຊື່ວ່າມຸນີ ບຸກຄົນຜູ້ເປັນມຸນີຍ່ອມບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງວ່າ ເຮົາເລີດກວ່າເຂົາ ເຮົາສະ ເໝີເຂົາ ຫຼື ເຮົາດ້ອຍກວ່າເຂົາ ລວມຄວາມວ່າ ບຸກຄົນຜູ້ເປັນມຸນີ ໆລໆ ຍ່ອມບໍ່ກ່າວໃນເລື້ອງເລີດກວ່າເຂົາ ບໍ່ກ່າວໃນເລື້ອງສະເໝີເຂົາ ບໍ່ກ່າວໃນເລື້ອງດ້ອຍກວ່າເຂົາ

## ວ່າດ້ວຍການກຳນົດ ໒ ຢ່າງ

ຄຳວ່າ ເປັນຜູ້ບໍ່ມີຄວາມກຳນົດ ຍ່ອມບໍ່ເຖິງຄວາມກຳນົດ ອະທິບາຍວ່າ
ຄຳວ່າ ຄວາມກຳນົດ ໄດ້ແກ່ ຄວາມກຳນົດ ໒ ຢ່າງ ຄື

໑. ຄວາມກຳນົດດ້ວຍອຳນາດຕັນຫາ
໒. ຄວາມກຳນົດດ້ວຍອຳນາດທິດຖິ ໆລໆ

ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດຕັນຫາ ໆລໆ ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດທິດຖິ ບຸກຄົນນັ້ນລະຄວາມກຳນົດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຈຶ່ງບໍ່ເຖິງ ຄື ບໍ່ເຂົ້າເຖິງ ບໍ່ເຂົ້າໄປເຖິງ ບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນຄວາມກຳນົດດ້ວຍອຳນາດຕັນຫາ ຫຼື ຄວາມກຳນົດດ້ວຍອຳນາດທິດຖິ ລວມຄວາມວ່າ ຍ່ອມບໍ່ເຖິງຄວາມກຳນົດ

ຄຳວ່າ ເປັນຜູ້ບໍ່ມີຄວາມກຳນົດ ອະທິບາຍວ່າ
ຄຳວ່າ ຄວາມກຳນົດ ໄດ້ແກ່ ຄວາມກຳນົດ ໒ ຢ່າງ ຄື

໑. ຄວາມກຳນົດດ້ວຍອຳນາດຕັນຫາ
໒. ຄວາມກຳນົດດ້ວຍອຳນາດທິດຖິ ໆລໆ

ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດຕັນຫາ ໆລໆນີ້ຊື່ວ່າຄວາມກຳນົດດ້ວຍອຳນາດທິດຖິ ບຸກຄົນນັ້ນລະຄວາມກຳນົດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມກຳນົດດ້ວຍອຳນາດ

ທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຈຶ່ງບໍ່ກຳນົດ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ເຊິ່ງຄວາມກຳນົດດ້ວຍອຳນາດຕັນຫາ ຫຼືຄວາມກຳນົດດ້ວຍອຳນາດທິດຖິ ລວມຄວາມວ່າ ເປັນຜູ້ບໍ່ມີຄວາມກຳນົດ ຍ່ອມບໍ່ເຖິງຄວາມກຳນົດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

> ບຸກຄົນຜູ້ເປັນມຸນີ ເປັນຜູ້ຄາຍຄວາມຍິນດີ
> ບໍ່ຂີ້ຖີ່ ຍ່ອມບໍ່ກ່າວໃນເລື້ອງເລີດກວ່າເຂົາ
> ບໍ່ກ່າວໃນເລື້ອງສະເໝີເຂົາ ບໍ່ກ່າວໃນເລື້ອງດ້ອຍກວ່າເຂົາ
> ເປັນຜູ້ບໍ່ມີຄວາມກຳນົດ ຍ່ອມບໍ່ເຖິງຄວາມກຳນົດ

[໘໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

> ບຸກຄົນໃດບໍ່ມີຄວາມຖືວ່າເປັນຂອງຕົນໃນໂລກ
> ເມື່ອບໍ່ມີຄວາມຖືວ່າເປັນຂອງຕົນ ຍ່ອມບໍ່ເສົ້າໂສກ
> ບໍ່ເຖິງຄວາມລຳອຽງໃນທຳທັງຫຼາຍ
> ບຸກຄົນນັ້ນແລ ຮຽກວ່າ ຜູ້ສະຫງົບ

## ວ່າດ້ວຍຜູ້ບໍ່ມີຄວາມຖືວ່າເປັນຂອງຕົນ

ຄຳວ່າ ບຸກຄົນໃດ ໃນຄຳວ່າ ບຸກຄົນໃດ ບໍ່ມີຄວາມຖືວ່າເປັນຂອງຕົນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ບໍ່ມີຄວາມຖືວ່າເປັນຂອງຕົນໃນໂລກ ອະທິບາຍວ່າ ບຸກຄົນໃດບໍ່ມີຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຖິງຮູບ ເວທະນາ ສັນຍາ ສັງຂານ ວິນຍານໃດ ໆ ວ່າ ນີ້ຂອງເຮົາ ຫຼື ສິ່ງນີ້ຂອງຜູ້ອື່ນ ຄວາມຖືວ່າເປັນຂອງຕົນ ບຸກຄົນນັ້ນລະໄດ້ແລ້ວ ຯລຯ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ບຸກຄົນໃດ ບໍ່ມີຄວາມຖືວ່າເປັນຂອງຕົນໃນໂລກ

## ວ່າດ້ວຍຜູ້ບໍ່ເສົ້າໂສກ

ຄຳວ່າ ເມື່ອບໍ່ມີຄວາມຖືວ່າເປັນຂອງຕົນ ຍ່ອມບໍ່ເສົ້າໂສກ ອະທິບາຍວ່າ ບໍ່ເສົ້າໂສກເຖິງວັດຖຸທີ່ຜັນປ່ຽນໄປ ຫຼື ເມື່ອວັດຖຸຜັນປ່ຽນໄປແລ້ວກໍບໍ່ເສົ້າໂສກ ຍ່ອມບໍ່ເສົ້າໂສກ ຄື ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຕາຂອງເຮົາຜັນປ່ຽນໄປ ຯລຯ ຫູຂອງເຮົາ ຯລຯ ດັງຂອງເຮົາ ຯລຯ. ລີ້ນຂອງເຮົາ ຯລຯ ກາຍຂອງເຮົາ ຯລຯ ໃຈຂອງເຮົາ ຯລຯ ຮູບຂອງເຮົາ ຯລຯ ສຽງຂອງເຮົາ ຯລຯ ກິ່ນຂອງເຮົາ ຯລຯ ຣົດຂອງເຮົາ ຯລຯ ໂຜດຖັບພະຂອງເຮົາ

ໃນຯ ຕະກູນຂອງເຮົາ ໃນຯ ໝູ່ຄະນະຂອງເຮົາ ໃນຯ ອາວາດຂອງເຮົາ ໃນຯ ລາບຂອງເຮົາ ໃນຯ ຍົດຂອງເຮົາ ໃນຯ ສັນເສີນຂອງເຮົາ ໃນຯ ສຸກຂອງເຮົາ ໃນຯ ຈີວອນຂອງເຮົາ ໃນຯ ບິນທະບາດຂອງເຮົາ ໃນຯ ເສນາສະນະຂອງເຮົາ ໃນຯ ຄິລານະປັດໄຈເພສັດບໍຣິຂານຂອງເຮົາ ໃນຯ ມານດາຂອງເຮົາ ໃນຯ ບິດາຂອງເຮົາ ໃນຯ ອ້າຍນ້ອງຊາຍຂອງເຮົາ ໃນຯ ເອື້ອຍນ້ອງສາວຂອງເຮົາ ໃນຯ ບຸດຂອງເຮົາ ໃນຯ ທິດາຂອງເຮົາ ໃນຯ ມິດແລະອຳມາດຂອງເຮົາ ໃນຯ ຍາດຂອງເຮົາ ໃນຯ ຍ່ອມບໍ່ເສົ້າໂສກ ຄື ບໍ່ລຳບາກໃຈ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຜູ້ຮ່ວມສາຍໂລຫິດຂອງເຮົາ ຜັນປ່ຽນໄປ ລວມຄວາມວ່າ ເມື່ອບໍ່ມີຄວາມຖືວ່າເປັນຂອງຕົນ ຍ່ອມບໍ່ເສົ້າໂສກ ແນວນີ້ແດ່

ອີກໄນໜຶ່ງ ບຸກຄົນໃດຖືກຄວາມບໍ່ຍິນດີ ຄື ທຸກຂະເວທະນາກະທົບ ຄອບງຳ ກຸ້ມລຸມ ປະກອບ ຍ່ອມບໍ່ເສົ້າໂສກ ຄື ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼ ໄດ້ແກ່ ຖືກໂຣກທາງຕາກະທົບ ຄອບງຳ ກຸ້ມລຸມ ປະກອບ ຍ່ອມບໍ່ເສົ້າໂສກ ຄື ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼ ຖືກໂຣກທາງຫູ ໃນຯ. ໂຣກທາງດັງ ໃນຯ ໂຣກທາງລີ້ນ ໃນຯ ໂຣກທາງກາຍ ໃນຯ ໂຣກຫົວ ໃນຯ ໂຣກຫູ ໃນຯ ໂຣກປາກ ໃນຯ ໂຣກແຂ້ວ ໃນຯ ໂຣກໄອ ໃນຯ ໂຣກຫືດ ໃນຯ ໄຂ້ຫວັດ ໃນຯ ໄຂ້ພິດ ໃນຯ ໄຂ້ເຊື່ອງຊຶມ ໃນຯ ໂຣກທ້ອງ ໃນຯ ເປັນລົມສະຫຼົບ ໃນຯ ລົງແດງ ໃນຯ ຈຸກສຽດ ໃນຯ ອະຫິວາຕະກະໂຣກ ໃນຯ ໂຣກຂີ້ທູດ ໃນຯ ຝີ ໃນຯ ກາກ ໃນຯ ຫຼອດລົມໂປ່ງພອງ ໃນຯ ລົມບ້າໝູ ໃນຯ ຫິດເປື່ອຍ ໃນຯ ຫິດດ້ານ ໃນຯ ຫິດ ໃນຯ ຫູດ ໃນຯ ໂຣກລະລອກ ໃນຯ ໂຣກບິຊ່ານ ໃນຯ ໂຣກເບົາຫວານ ໃນຯ ໂຣກເຣີມ ໃນຯ ໂຣກພຸພອງ ໃນຯ ໂຣກຣິດສີດວງທະວານ ໃນຯ ຄວາມເຈັບປ່ວຍ ທີ່ເກີດຈາກບີ ໃນຯ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ໃນຯ ຄວາມເຈັບປ່ວຍທີ່ເກີດຈາກລົມ ໃນຯ ໄຂ້ສັນນິບາດ ໃນຯ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ໃນຯ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິຣິຍາບົດບໍ່ໄດ້ສ່ວນກັນ ໃນຯ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ໃນຯ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ໃນຯ ຄວາມໜາວ ໃນຯ ຄວາມຮ້ອນ ໃນຯ ຄວາມຫິວ ໃນຯ ຄວາມກະຫາຍ ໃນຯ ປວດອຸດຈາຣະ ໃນຯ ປວດປັດສາວະ ໃນຯ ທຸກທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານກະທົບ ຄອບງຳ ກຸ້ມລຸມ ປະກອບ ຍ່ອມບໍ່ເສົ້າໂສກ ຄື ບໍ່ລຳບາກໃຈ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼ ລວມຄວາມວ່າ ເມື່ອບໍ່ມີຄວາມຖືວ່າເປັນຂອງຕົນ ຍ່ອມບໍ່ເສົ້າໂສກ ແນວນີ້ແດ່

ອີກໄນໜຶ່ງ ເມື່ອຄວາມຖືວ່າເປັນຂອງຕົນບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ຍ່ອມບໍ່ເສົ້າໂສກ ຄື ບໍ່ລຳບາກໃຈ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ໂອ ເຮົາບໍ່ມີສິ່ງນັ້ນນໍ ເຮົາເພິ່ງມີສິ່ງນັ້ນນໍ ແລະເຮົາບໍ່ໄດ້ສິ່ງນັ້ນນໍ ລວມຄວາມວ່າ ເມື່ອບໍ່ມີຄວາມຖືວ່າເປັນຂອງຕົນ ກໍຍ່ອມບໍ່ເສົ້າໂສກ ແນວນີ້ແດ່

## ວ່າດ້ວຍຜູ້ບໍ່ລຳອຽງ

ຄຳວ່າ ບໍ່ເຖິງຄວາມລຳອຽງໃນທຳທັງຫຼາຍ ອະທິບາຍວ່າ ບໍ່ເຖິງສັນທາຄະຕິ ບໍ່ເຖິງໂທສາຄະຕິ ບໍ່ເຖິງໂມຫາຄະຕິ ບໍ່ເຖິງພະຍາຄະຕິ ຄື ບໍ່ດຳເນີນໄປຕາມອຳນາດຣາຄະ ບໍ່ດຳເນີນໄປຕາມອຳນາດໂທສະ ບໍ່ດຳເນີນໄປຕາມອຳນາດໂມຫະ ບໍ່ດຳເນີນໄປຕາມອຳນາດ ມານະ ບໍ່ດຳເນີນໄປຕາມອຳນາດທິດຖິ ບໍ່ດຳເນີນໄປຕາມອຳນາດອຸດທັດຈະ ບໍ່ດຳເນີນໄປຕາມອຳນາດວິຈິກິດສາ ບໍ່ດຳເນີນໄປຕາມອຳນາດອະນຸໄສ ໄດ້ແກ່ ບໍ່ໄປ ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປ ດ້ວຍທຳທີ່ກໍ່ຄວາມເປັນຝັກເປັນຝ່າຍ ລວມຄວາມວ່າ ບໍ່ເຖິງຄວາມລຳອຽງໃນທຳທັງຫຼາຍ

## ວ່າດ້ວຍຜູ້ສະງົບ

ຄຳວ່າ ບຸກຄົນນັ້ນແລ ຮຽກວ່າ ຜູ້ສະງົບ ອະທິບາຍວ່າ ບຸກຄົນນັ້ນ ຮຽກ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງວ່າຜູ້ສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ສະຫງັດ ລວມຄວາມວ່າ ຜູ້ນັ້ນແລ ຮຽກວ່າ ຜູ້ສະງົບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນໃດບໍ່ມີຄວາມຖືວ່າເປັນຂອງຕົນໃນໂລກ
ເມື່ອບໍ່ມີຄວາມຖືວ່າເປັນຂອງຕົນ ຍ່ອມບໍ່ເສົ້າໂສກ
ບໍ່ເຖິງຄວາມລຳອຽງໃນທຳທັງຫຼາຍ
ບຸກຄົນນັ້ນແລ ຮຽກວ່າ ຜູ້ສະງົບ

**ປຸຣາເພທະສຸດຕະນິດເທດທີ ໑໐ ຈົບ**

# ໑໑. ກະລະຫະວິວາທະສຸດຕະນິດເທດ

## ອະທິບາຍກະລະຫະວິວາທະສູດ

### ວ່າດ້ວຍການຜິດການຖຽງກັນ

ພຣະສາຣີບຸດເຖຣະຈະກ່າວອະທິບາຍກະລະຫະວິວາທະສູດ ດັ່ງຕໍ່ໄປນີ້

[໘໗] (ພຣະພຸດທະເນຣະມິດທູນຖາມວ່າ)

ການຜິດ ການຖຽງ ຄວາມຮ່ຳໄຮ
ຄວາມເສົ້າໂສກ ຄວາມຂີ້ຖີ່ ຄວາມຖືຕົວ
ຄວາມດູໝິ່ນແລະວາຈາສັບສໍ່ ມີມາຈາກໃສ
ກິເລດເຫຼົ່ານັ້ນມີມາຈາກໃສ
ຂໍເຊີນພຣະອົງໂຜດຕັດບອກເຫດນັ້ນ

ຄຳວ່າ ການຜິດກັນ ໃນຄຳວ່າ ການຜິດກັນ ການຖຽງກັນ ໆລໆ ມີມາຈາກໃສ ອະທິບາຍວ່າ ການຜິດຖຽງມີອາການຢ່າງດຽວກັນກັບການວິວາດ ໄດ້ແກ່ ການຜິດຖຽງ ກໍຄືການວິວາດ ການວິວາດ ກໍຄືການຜິດຖຽງ

ອີກໄນໜຶ່ງ ວ່າໂດຍການຜິດຖຽງທີ່ມີອາການຕ່າງຈາກການວິວາດ ການວິວາດທີ່ເປັນສ່ວນເບື້ອງຕົ້ນແຫ່ງການຜິດຖຽງ ຮຽກວ່າ ການວິວາດ ກ່າວຄື ພຣະຣາຊາຊົງວິວາດກັບພຣະຣາຊາກໍໄດ້ ກະສັດວິວາດກັບກະສັດກໍໄດ້ ພາມວິວາດກັບພາມກໍໄດ້ ຄະຫະບໍດີວິວາດກັບຄະຫະບໍດີກໍໄດ້ ມານດາວິວາດກັບບຸດກໍໄດ້ ບຸດວິວາດກັບມານດາກໍໄດ້ ບິດາວິວາດກັບບຸດກໍໄດ້ ບຸດວິວາດກັບບິດາກໍໄດ້ ອ້າຍນ້ອງຊາຍວິວາດກັບອ້າຍນ້ອງຊາຍກໍໄດ້ ເອື້ອຍນ້ອງສາວວິວາດກັບເອື້ອຍນ້ອງສາວກໍໄດ້ ອ້າຍນ້ອງຊາຍວິວາດກັບເອື້ອຍນ້ອງສາວກໍໄດ້ ເອື້ອຍນ້ອງສາວວິວາດກັບອ້າຍນ້ອງຊາຍກໍໄດ້ ສະຫາຍວິວາດກັບສະຫາຍກໍໄດ້ ນີ້ຊື່ວ່າການວິວາດ

ການຜິດຖຽງເປັນແນວໃດ?

ຄື ຄົນຄອງເຮືອນໃຝ່ຫາເລື້ອງກັນ ກໍທຳການຜິດຖຽງກັນດ້ວຍກາຍວາຈາ ບັນພະຊິດຕ້ອງອາບັດກໍທຳການຜິດຖຽງກັນດ້ວຍກາຍວາຈາ ນີ້ຊື່ວ່າການຜິດຖຽງ

ຄຳວ່າ ການຜິດຖຽງ ການວິວາດ ໆລໆ ມີມາຈາກໃສ ອະທິບາຍວ່າ ພຣະພຸດທະເນຣະມິດ ທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດມູນເຫດ ຕົ້ນເຫດ ການ

ເກີດຂຶ້ນ ແດນເກີດ ສະມຸດຖານ ອາຫານ ອາລົມ ປັດໄຈ ເຫດເກີດວ່າ ການພິດຖຽງ ແລະການວິວາດ ມີມາຈາກໃສ ຄື ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຈາກໃສ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ການພິດຖຽງ ການວິວາດ ໆລໆ ມີມາຈາກໃສ

## ວ່າດ້ວຍຄວາມຮ່ຳໄຮ

ຄຳວ່າ ຄວາມຮ່ຳໄຮ ໃນຄຳວ່າ ຄວາມຮ່ຳໄຮ ຄວາມເສົ້າໂສກ ຄວາມຂີ້ຖີ່ ອະທິບາຍວ່າ ຄວາມຈົ່ມເພີ້ ຄວາມຮ່ຳໄຮ ກິຣິຍາທີ່ຈົ່ມເພີ້ ກິຣິຍາທີ່ຮ່ຳໄຮ ພາວະທີ່ຈົ່ມເພີ້ ພາວະທີ່ຮ່ຳໄຮ ການເວົ້າລ່າຍ ການເວົ້າເພີ້ ການເວົ້າເພີ້ເຈີ້ ຄວາມພ່ຳເພີ້ ກິຣິຍາທີ່ພ່ຳເພີ້ ພາວະທີ່ພ່ຳເພີ້ ຂອງຜູ້ຖືກຄວາມເສຍຫາຍຂອງຍາດກະທົບແດ່ ຖືກຄວາມເສຍຫາຍແຫ່ງໂພຄະຊັບກະທົບແດ່ ຖືກຄວາມເສຍຫາຍຍ້ອນໂຣກກະທົບແດ່ ຖືກສີນວິບັດກະທົບແດ່ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍນອກຈາກທີ່ກ່າວແລ້ວກະທົບແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

## ວ່າດ້ວຍຄວາມເສົ້າໂສກ

ຄຳວ່າ ຄວາມເສົ້າໂສກ ໄດ້ແກ່ ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມເສົ້າໂສກພາຍໃນ ຄວາມເສົ້າໂສກຫຼາຍພາຍໃນ ຄວາມຮ້ອນຮົນພາຍໃນ ຄວາມຮ້ອນຮົນຫຼາຍພາຍໃນ ຄວາມມົກໄໝ້ແຫ່ງຈິດ ຄວາມທຸກໃຈ ລູກສອນຄືຄວາມເສົ້າໂສກຂອງຜູ້ຖືກຄວາມເສຍຫາຍຂອງຍາດກະທົບແດ່ ຖືກຄວາມເສຍຫາຍແຫ່ງໂພຄະຊັບກະທົບແດ່ ຖືກຄວາມເສຍຫາຍຍ້ອນໂຣກກະທົບແດ່ ຖືກສີນວິບັດກະທົບແດ່ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວແລ້ວກະທົບແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

ຄຳວ່າ ຄວາມຂີ້ຖີ່ ໄດ້ແກ່ ມັດສະຣິຍະ ໕ ຢ່າງ ຄື

໑. ອາວາສະມັດສະຣິຍະ
໒. ກຸລະມັດສະຣິຍະ
໓. ລາພະມັດສະຣິຍະ
໔. ວັນນະມັດສະຣິຍະ
໕. ທຳມະມັດສະຣິຍະ

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມເຫັນແກ່ໄດ້ ຄວາມຖີ່ໜຽວ ຄວາມທີ່ຈິດເຈັບຮ້ອນ (ໃນການໃຫ້) ຄວາມທີ່ຈິດຫວງແຫນເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຂີ້ຖີ່

ອີກໄນໜຶ່ງ ຄວາມຂີ້ຖີ່ຂັນກໍດີ ຄວາມຂີ້ຖີ່ທາດກໍດີ ຄວາມຂີ້ຖີ່ອາຍະຕະນະກໍດີ ຄວາມມຸ້ງແຕ່ຈະໄດ້ກໍດີ ນີ້ຕັດຮຽກວ່າ ຄວາມຂີ້ຖີ່ ລວມຄວາມວ່າ ຄວາມຮ່ຳໄຮ ຄວາມເສົ້າໂສກ ຄວາມຂີ້ຖີ່

ຄຳວ່າ ຄວາມຖືຕົວ ໃນຄຳວ່າ ຄວາມຖືຕົວ ຄວາມດູໝິ່ນແລະວາຈາສັບສໍ່ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ ເກີດຄວາມຖືຕົວ ຍ້ອນຊາດແດ່ ຍ້ອນໂຄດແດ່ ຍ້ອນເປັນບຸດຂອງຜູ້ມີຕະກູນແດ່ ຍ້ອນເປັນຜູ້ມີຮູບງາມແດ່ ຍ້ອນມີຊັບແດ່ ຍ້ອນການສຶກສາແດ່ ຍ້ອນໜ້າທີ່ວຽກງານແດ່ ຍ້ອນມີຫຼັກແຫ່ງສິລະປະວິທະຍາແດ່ ຍ້ອນວິທະຍະຖານະແດ່ ຍ້ອນຄວາມຄົງແກ່ຮຽນແດ່ ຍ້ອນປະຕິພານແດ່ ຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວແດ່

ຄຳວ່າ ຄວາມດູໝິ່ນ ໄດ້ແກ່ ຄົນບາງຄົນໃນໂລກນີ້ ດູໝິ່ນຜູ້ອື່ນ ຍ້ອນຊາດແດ່ ຍ້ອນໂຄດແດ່ ຯລຯ ຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວແດ່

## ວ່າດ້ວຍຜູ້ມີວາຈາສັບສໍ່

ຄຳວ່າ ແລະວາຈາສັບສໍ່ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ ເປັນຜູ້ມີວາຈາສັບສໍ່ ຟັງຈາກຂ້າງນີ້ແລ້ວໄປບອກຂ້າງນັ້ນເພື່ອທຳລາຍຄົນໝູ່ນີ້ ຫຼື ຟັງຈາກຂ້າງນັ້ນແລ້ວມາບອກຄົນຂ້າງນີ້ເພື່ອທຳລາຍຄົນໝູ່ນັ້ນ ດ້ວຍວິທີນີ້ ກໍເຮັດຄົນທີ່ສາມັກຄີໃຫ້ແຕກແຍກ ຫຼື ສະໜັບສະໜູນຜູ້ທີ່ແຕກແຍກກັນແລ້ວ ມັກການແບ່ງພວກແບ່ງເຫຼົ່າ ຍິນດີການແບ່ງພວກແບ່ງເຫຼົ່າ ສະນຸກກັບການແບ່ງພວກແບ່ງເຫຼົ່າ ເວົ້າແຕ່ເລື້ອງກໍ່ໃຫ້ເກີດການແບ່ງພວກແບ່ງເຫຼົ່ານີ້ຕັດຮຽກວ່າ ຄວາມເປັນຜູ້ມີວາຈາສັບສໍ່

ອີກໄນໜຶ່ງ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍເຫດ ໒ ປະການ ຄື

໑. ດ້ວຍປະສົງໃຫ້ຕົນເປັນທີ່ຮັກ
໒. ດ້ວຍປະສົງໃຫ້ເຂົາແຕກກັນ

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກດ້ວຍຄິດວ່າ ເຮົາຈັກເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ຄຸ້ນເຄີຍ ເປັນທີ່ສະໜິດສະໜົມ ເປັນທີ່ດີໃຈຂອງຜູ້ນີ້ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວນີ້

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ເຂົາແຕກກັນ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍຄິດວ່າ ເຮັດແນວໃດ ຊົນເຫຼົ່ານີ້ ເພິ່ງເປັນຄົນແປກແຍກ ແຕກຕ່າງ ເປັນພັກເປັນເຫຼົ່າ ເປັນ ໒ ພວກ ເປັນ ໒ ຝັກ ໒ ຝ່າຍ ແຕກແຍກ ບໍ່ປອງດອງກັນ ຢູ່ລຳບາກ ບໍ່ສະບາຍ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ເຂົາແຕກກັນ ເປັນແນວນີ້ ລວມຄວາມວ່າ ຄວາມຖືຕົວ ຄວາມດູໝິ່ນ ແລະວາຈາສັບສໍ່

ຄຳວ່າ ກິເລດເຫຼົ່ານັ້ນມີມາຈາກໃສ ຂໍເຊີນພຣະອົງໂຜດຕັດບອກເຫດນັ້ນ ອະທິບາຍວ່າ ພຣະພຸດທະເນຣະມິດ ທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດ ມູນເຫດ ຕົ້ນເຫດ ການເກີດຂຶ້ນ ແດນເກີດ ສະມຸດຖານ ອາຫານ ອາລົມ ປັດໃຈ ເຫດເກີດແຫ່ງກິເລດ ໘ ຈຳພວກເຫຼົ່ານີ້ວ່າ ກິເລດ ໘ ຈຳພວກເຫຼົ່ານີ້ ຄື

໑. ການຜິດກັນ ໒. ການຖຽງກັນ
໓. ຄວາມຮ່ຳໄຮ ໔. ຄວາມເສົ້າໂສກ
໕. ຄວາມຂີ້ຖີ່ ໖. ຄວາມຖືຕົວ
໗. ຄວາມດູໝິ່ນ ໘. ວາຈາສັບສໍ່

ມີມາຈາກໃສ ຄື ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຈາກໃສ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ກິເລດເຫຼົ່ານັ້ນມີມາຈາກໃສ

ຄຳວ່າ ຂໍເຊີນພຣະອົງໂຜດຕັດບອກເຫດນັ້ນ ອະທິບາຍວ່າ ຂໍເຊີນພຣະອົງໂຜດຕັດ ຄື ຂໍໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ອະທິບາຍໃຫ້ງ່າຍ ປະກາດ ລວມຄວາມວ່າ ກິເລດເຫຼົ່ານັ້ນມີມາຈາກໃສ ຂໍເຊີນພຣະອົງໂຜດຕັດບອກ ເຫດນັ້ນ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ການຜິດກັນ ການຖຽງກັນ ຄວາມຮ່ຳໄຮ
ຄວາມເສົ້າໂສກ ຄວາມຂີ້ຖີ່ ຄວາມຖືຕົວ
ຄວາມດູໝິ່ນແລະວາຈາສັບສໍ່ ມີມາຈາກໃສ
ກິເລດເຫຼົ່ານັ້ນມີມາຈາກໃສ
ຂໍເຊີນພຣະອົງໂຜດຕັດບອກເຫດນັ້ນດ້ວຍເທີ້ນ

[໙໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ການຜິດກັນ ການຖຽງກັນ ຄວາມຮ່ຳໄຮ
ຄວາມເສົ້າໂສກ ຄວາມຂີ້ຖີ່ ຄວາມຖືຕົວ
ຄວາມດູໝິ່ນແລະວາຈາສັບສໍ່ ມີມາຈາກສິ່ງເປັນທີ່ຮັກ
ການຜິດກັນ ການຖຽງກັນ ປະກອບໃນຄວາມຂີ້ຖີ່
ມີມາຈາກສິ່ງເປັນທີ່ຮັກ ເມື່ອການວິວາດເກີດຂຶ້ນແລ້ວ
ກໍມີວາຈາສັບສໍ່ເກີດຂຶ້ນ

## ວ່າດ້ວຍການຜິດຖຽງເປັນຕົ້ນ ມາຈາກສິ່ງເປັນທີ່ຮັກ

ຄຳວ່າ ສິ່ງເປັນທີ່ຮັກ ໃນຄຳວ່າ ການຜິດຖຽງ ການວິວາດ ຄວາມຮ່ຳໄຮ ຄວາມເສົ້າໂສກ ຄວາມຂີ້ຖີ່ ໆລໆ ມີມາຈາກສິ່ງເປັນທີ່ຮັກ ໄດ້ແກ່ ສິ່ງເປັນທີ່ຮັກ ໒ ຈຳພວກ ຄື (໑) ສັດ (໒) ສັງຂານ

ສັດເຫຼົ່າໃດເປັນທີ່ຮັກ ສັດທັງຫຼາຍໃນໂລກນີ້ ເປັນຜູ້ປາຖະໜາແຕ່ສິ່ງທີ່ເປັນ ປະໂຫຍດ ປາຖະໜາແຕ່ສິ່ງທີ່ເກື້ອກູນ ປາຖະໜາແຕ່ຄວາມຜາສຸກ ປາຖະໜາແຕ່ຄວາມຫຼຸດພົ້ນຈາກໂຍຄະ ຄື ມານດາ ບິດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ບຸດ ທິດາ ມິດ ອຳມາດ ຍາດ ຫຼື ຜູ້ຮ່ວມສາຍໂລຫິດຂອງຜູ້ນັ້ນ ສັດເຫຼົ່ານີ້ຊື່ວ່າສິ່ງເປັນທີ່ຮັກ

ສັງຂານເຫຼົ່າໃດເປັນທີ່ຮັກ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ໜ້າພໍໃຈ ສັງຂານເຫຼົ່ານີ້ ຊື່ວ່າສິ່ງເປັນທີ່ຮັກ

ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຖືກແຍ່ງຊີງໄປ ຍ່ອມກໍ່ການຜິດຖຽງກັນແດ່ ເມື່ອສິ່ງເປັນທີ່ຮັກກຳລັງຖືກແຍ່ງຊີງໄປຍ່ອມກໍ່ການຜິດຖຽງກັນແດ່ ເມື່ອສິ່ງເປັນທີ່ຮັກຖືກແຍ່ງຊີງໄປແລ້ວຍ່ອມກໍ່ການຜິດຖຽງກັນແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຜັນປ່ຽນໄປ ຍ່ອມກໍ່ການຜິດຖຽງກັນແດ່ ເມື່ອສິ່ງເປັນທີ່ຮັກກຳລັງຜັນປ່ຽນໄປ ຍ່ອມກໍ່ການຜິດຖຽງກັນແດ່ ເມື່ອສິ່ງເປັນທີ່ຮັກຜັນປ່ຽນໄປແລ້ວ ຍ່ອມກໍ່ການຜິດຖຽງກັນແດ່

ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຖືກແຍ່ງຊີງໄປ ຍ່ອມວິວາດກັນແດ່ ເມື່ອສິ່ງເປັນທີ່ຮັກກຳລັງຖືກແຍ່ງຊີງໄປ ຍ່ອມວິວາດກັນແດ່ ເມື່ອສິ່ງເປັນທີ່ຮັກຖືກແຍ່ງຊີງໄປແລ້ວຍ່ອມວິວາດກັນແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຜັນປ່ຽນໄປ ຍ່ອມວິວາດກັນແດ່ ເມື່ອສິ່ງເປັນທີ່ຮັກກຳລັງຜັນປ່ຽນໄປ ຍ່ອມວິວາດກັນແດ່ ເມື່ອສິ່ງເປັນທີ່ຮັກ ຜັນປ່ຽນໄປແລ້ວຍ່ອມວິວາດກັນແດ່

ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຖືກແຍ່ງຊີງໄປ ຍ່ອມຮ່ຳໄຮແດ່ ເມື່ອສິ່ງເປັນທີ່ຮັກກຳລັງຖືກແຍ່ງຊີງໄປ ຍ່ອມຮ່ຳໄຮແດ່ ເມື່ອສິ່ງເປັນທີ່ຮັກຖືກແຍ່ງຊີງໄປແລ້ວ ຍ່ອມຮ່ຳໄຮແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຜັນປ່ຽນໄປ ຍ່ອມຮ່ຳໄຮແດ່ ເມື່ອສິ່ງເປັນທີ່ຮັກກຳລັງຜັນປ່ຽນໄປ ຍ່ອມຮ່ຳໄຮແດ່ ເມື່ອສິ່ງເປັນທີ່ຮັກຜັນປ່ຽນໄປແລ້ວ ຍ່ອມຮ່ຳໄຮແດ່

ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຖືກແຍ່ງຊີງໄປ ຍ່ອມເສົ້າໂສກແດ່ ເມື່ອສິ່ງເປັນທີ່ຮັກກຳລັງຖືກແຍ່ງຊີງໄປ ຍ່ອມເສົ້າໂສກແດ່ ເມື່ອສິ່ງເປັນທີ່ຮັກຖືກແຍ່ງຊີງໄປແລ້ວຍ່ອມເສົ້າໂສກແດ່ ຊົນທັງຫຼາຍຜູ້ຫວາດຣະແວງວ່າສິ່ງເປັນທີ່ຮັກຈະຜັນປ່ຽນໄປ ຍ່ອມ ເສົ້າໂສກແດ່ ເມື່ອສິ່ງເປັນທີ່ຮັກກຳລັງຜັນປ່ຽນໄປ ຍ່ອມເສົ້າໂສກແດ່ ເມື່ອສິ່ງເປັນທີ່ຮັກ ຜັນປ່ຽນໄປແລ້ວຍ່ອມເສົ້າໂສກແດ່

ຊົນທັງຫຼາຍ ຍ່ອມຮັກສາ ປົກປ້ອງ ຖືຄອງ ຍຶດຖືວ່າເປັນຂອງເຮົາ ປະພຶດ ຂີ້ຖີ່ຢູ່ເຊິ່ງສິ່ງເປັນທີ່ຮັກ

ຄຳວ່າ ຄວາມຖືຕົວ ຄວາມດູໝິ່ນແລະວາຈາສັບສໍ່ ອະທິບາຍວ່າ ຊົນທັງຫຼາຍ ເກີດຄວາມຖືຕົວຍ້ອນອາໄສສິ່ງເປັນທີ່ຮັກ ເກີດຄວາມດູໝິ່ນຍ້ອນອາໄສສິ່ງເປັນທີ່ຮັກ

ຊົນທັງຫຼາຍເກີດຄວາມຖືຕົວຍ້ອນອາໄສສິ່ງເປັນທີ່ຮັກ ເປັນແນວໃດ?

ຄື ຊົນທັງຫຼາຍເກີດຄວາມຖືຕົວຍ້ອນອາໄສສິ່ງເປັນທີ່ຮັກວ່າ ເຮົາເປັນຜູ້ມີປົກກະຕິໄດ້ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ຖືກໃຈ ຊົນທັງຫຼາຍເກີດຄວາມຖືຕົວຍ້ອນອາໄສສິ່ງເປັນທີ່ຮັກ ເປັນແນວນີ້

ຊົນທັງຫຼາຍເກີດຄວາມດູໝິ່ນຍ້ອນອາໄສສິ່ງເປັນທີ່ຮັກ ເປັນແນວໃດ?

ຄື ຊົນທັງຫຼາຍເກີດຄວາມດູໝິ່ນຍ້ອນອາໄສສິ່ງເປັນທີ່ຮັກວ່າ ເຮົາເປັນຜູ້ມີປົກກະຕິ ໄດ້ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ຖືກໃຈ ສ່ວນຊົນອື່ນເຫຼົ່ານີ້ ບໍ່ມີປົກກະຕິໄດ້ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ຖືກໃຈ ຊົນທັງຫຼາຍເກີດຄວາມດູໝິ່ນຍ້ອນອາໄສສິ່ງເປັນທີ່ຮັກ ເປັນແນວນີ້

ຄຳວ່າ ວາຈາສັບສໍ່ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ ເປັນຜູ້ກ່າວວາຈາສັບສໍ່ ຟັງຈາກຂ້າງນີ້ແລ້ວ ໄປບອກຂ້າງນັ້ນເພື່ອທຳລາຍຄົນໝູ່ນີ້ ຯລຯ ຢ່າງນີ້ ຊື່ວ່ານຳວາຈາສັບສໍ່ເຂົ້າໄປ ໂດຍມຸ້ງຫວັງໃຫ້ເຂົາແຕກກັນ ລວມຄວາມວ່າ ຄວາມຖືຕົວ ຄວາມດູໝິ່ນ ແລະວາຈາສັບສໍ່

ຄຳວ່າ ການຜິດຖຽງ ການວິວາດ ປະກອບໃນຄວາມຂີ້ຖີ່ ໄດ້ແກ່ ກິເລດ ໗ ຊະນິດເຫຼົ່ານີ້ ຄື

໑. ການຜິດຖຽງ
໒. ການວິວາດ
໓. ຄວາມຮ່ຳໄຮ
໔. ຄວາມເສົ້າໂສກ
໕. ຄວາມຖືຕົວ
໖. ຄວາມດູໝິ່ນ
໗. ວາຈາສັບສໍ່

ປະກອບ ຄື ກ່ຽວເນື່ອງ ຕໍ່ເນື່ອງ ສືບເນື່ອງໃນຄວາມຂີ້ຖີ່ ລວມຄວາມວ່າ ການຜິດຖຽງການວິວາດ ປະກອບໃນຄວາມຂີ້ຖີ່

ຄຳວ່າ ເມື່ອການວິວາດເກີດຂຶ້ນແລ້ວ ກໍມີວາຈາສັບສໍ່ເກີດຂຶ້ນ ອະທິບາຍວ່າ ເມື່ອ ການວິວາດ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດແລ້ວ ຊົນທັງຫຼາຍຍ່ອມນຳວາຈາສັບສໍ່ເຂົ້າໄປ ຄື ຟັງຈາກຂ້າງນີ້ແລ້ວໄປບອກຂ້າງນັ້ນເພື່ອທຳລາຍຄົນໝູ່ນີ້ ຫຼື ຟັງຈາກຂ້າງນັ້ນແລ້ວມາບອກຂ້າງນີ້ເພື່ອທຳລາຍຄົນໝູ່ນັ້ນ ດ້ວຍວິທີນີ້ ກໍເຮັດຄົນທີ່ສາມັກຄີໃຫ້ແຕກແຍກ ຫຼື ສະໜັບສະໜຸນຜູ້ທີ່ແຕກແຍກກັນແລ້ວ ມັກການແບ່ງພວກແບ່ງເຫຼົ່າ ຍິນດີໃນການແບ່ງພວກແບ່ງເຫຼົ່າ ສະນຸກກັບການແບ່ງພວກແບ່ງເຫຼົ່າ ເວົ້າແຕ່ເລື້ອງກໍ່ໃຫ້ເກີດການແບ່ງພວກແບ່ງເຫຼົ່າ ນີ້ຕັດຮຽກວ່າວາຈາສັບສໍ່

ອີກໄນໜຶ່ງ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍເຫດ ໒ ປະການ ຄື (໑) ດ້ວຍປະສົງໃຫ້ຕົນເປັນທີ່ຮັກ (໒) ດ້ວຍປະສົງໃຫ້ເຂົາແຕກກັນ

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກວ່າ ເຮົາຈັກເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ຄຸ້ນເຄີຍ ເປັນທີ່ສະໜິດສະໜົມ ເປັນທີ່ດີໃຈຂອງຜູ້ນີ້ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວນີ້

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ເຂົາແຕກກັນ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ເຂົາແຕກກັນວ່າ ເຮັດແນວໃດ ຊົນເຫຼົ່ານີ້ ເພິ່ງເປັນຄົນແປກແຍກ ແຕກຕ່າງ ເປັນພັກເປັນເຫຼົ່າ ເປັນ ໒ ພວກ ເປັນ ໒ ຝັກ ໒ ຝ່າຍ ແຕກແຍກ ບໍ່ປອງດອງກັນ ຢູ່ລຳບາກບໍ່ສະບາຍ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ເຂົາແຕກກັນ ເປັນແນວນີ້ ລວມຄວາມວ່າ ເມື່ອການວິວາດເກີດຂຶ້ນແລ້ວ ກໍມີວາຈາສັບສໍ່ເກີດຂຶ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ການຜິດຖຽງ ການວິວາດ ຄວາມຮ່ຳໄຮ
ຄວາມເສົ້າໂສກ ຄວາມຂີ້ຖີ່ ຄວາມຖືຕົວ
ຄວາມດູໝິ່ນ ແລະວາຈາສັບສໍ່ ມີມາຈາກສິ່ງເປັນທີ່ຮັກ
ການຜິດຖຽງ ການວິວາດ ປະກອບໃນຄວາມຂີ້ຖີ່
ມີມາຈາກສິ່ງເປັນທີ່ຮັກ ເມື່ອການວິວາດເກີດຂຶ້ນແລ້ວ
ກໍມີວາຈາສັບສໍ່ເກີດຂຶ້ນ

[໙໙] (ພຣະພຸດທະເນຣະມິດທູນຖາມວ່າ)

ສິ່ງເປັນທີ່ຮັກໃນໂລກມີອັນໃດເປັນຕົ້ນເຫດ
ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ
ຄວາມໂລບຂອງຊົນເຫຼົ່ານັ້ນມີອັນໃດເປັນຕົ້ນເຫດ
ຄວາມຫວັງແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ
ຄວາມຫວັງແລະຄວາມສຳເລັດຫວັງນັ້ນມີອັນໃດເປັນຕົ້ນເຫດ

## ວ່າດ້ວຍອັນໃດເປັນຕົ້ນເຫດແຫ່ງສິ່ງເປັນທີ່ຮັກ

ຄຳວ່າ ສິ່ງເປັນທີ່ຮັກໃນໂລກມີອັນໃດເປັນຕົ້ນເຫດ ອະທິບາຍວ່າ ພຣະພຸດທະເນຣະມິດທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດເຖິງມູນ ຯລຯ ເຫດເກີດແຫ່ງ

ສິ່ງເປັນທີ່ຮັກວ່າ ສິ່ງເປັນທີ່ຮັກ ມີອັນໃດເປັນຕົ້ນເຫດ ຄື ເກີດຈາກອັນໃດ ເກີດຂຶ້ນຈາກໃສ ບັງເກີດຈາກອັນໃດ ບັງເກີດຂຶ້ນຈາກໃສ ຜາກົດຈາກອັນໃດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ສິ່ງເປັນທີ່ຮັກໃນໂລກ ມີອັນໃດເປັນຕົ້ນເຫດ

ຄຳວ່າ ແລະຊົນເຫຼົ່າໃດ ໃນຄຳວ່າ ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ແລະມະນຸດ

ຄຳວ່າ ຍ້ອນຄວາມໂລບ ໄດ້ແກ່ ຄວາມໂລບ ກິຣິຍາທີ່ໂລບ ພາວະທີ່ໂລບ ຄວາມ ກຳໜັດແຮງ ກິຣິຍາທີ່ກຳໜັດແຮງ ພາວະທີ່ກຳໜັດແຮງ ອະພິດຊາ ອະກຸສົນມູນຄື ໂລພະ

ຄຳວ່າ ທ່ອງທ່ຽວໄປ ໄດ້ແກ່ ທ່ອງທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ

ຄຳວ່າ ຄວາມຫວັງແລະຄວາມສຳເລັດຫວັງນັ້ນມີອັນໃດເປັນຕົ້ນເຫດ ອະທິບາຍວ່າ ພຣະພຸດທະເນຣະມິດທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດເຖິງມູນ ໆລໆເຫດເກີດແຫ່ງຄວາມຫວັງ ແລະຄວາມສຳເລັດຫວັງວ່າ ຄວາມຫວັງແລະຄວາມສຳເລັດຫວັງມີອັນໃດເປັນຕົ້ນເຫດ ຄື ເກີດຈາກອັນໃດ ເກີດຂຶ້ນຈາກໃສ ບັງເກີດຈາກອັນໃດ ບັງເກີດຂຶ້ນຈາກໃສ ຜາກົດຈາກອັນໃດ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ຄວາມຫວັງ ແລະຄວາມສຳເລັດຫວັງນັ້ນມີອັນໃດເປັນຕົ້ນເຫດ

ຄຳວ່າ ຄວາມຫວັງ ແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ ອະທິບາຍວ່າ ຄວາມຫວັງແລະຄວາມສຳເລັດຫວັງໃດ ເປັນທີ່ໄປໃນເບື້ອງໜ້າ ຄື ເປັນເກາະ ເປັນທີ່ຕ້ານທານ ເປັນທີ່ຫຼີບຫຼີກ ເປັນທີ່ເພິ່ງຂອງນໍຣະຊົນ ຄື ນໍຣະຊົນເປັນຜູ້ມີຄວາມສຳເລັດຫວັງ ເປັນທີ່ໄປໃນເບື້ອງໜ້າ ລວມຄວາມວ່າ ຄວາມຫວັງ ແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດ ຈຶ່ງທູນຖາມວ່າ

ສິ່ງເປັນທີ່ຮັກໃນໂລກມີອັນໃດເປັນຕົ້ນເຫດ
ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ
ຄວາມໂລບຂອງຊົນເຫຼົ່ານັ້ນມີອັນໃດເປັນຕົ້ນເຫດ
ຄວາມຫວັງແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ
ຄວາມຫວັງແລະຄວາມສຳເລັດຫວັງນັ້ນມີອັນໃດເປັນຕົ້ນເຫດ

[໑໐໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ສິ່ງເປັນທີ່ຮັກໃນໂລກມີຄວາມພໍໃຈເປັນຕົ້ນເຫດ
ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ
ຄວາມໂລບຂອງຊົນເຫຼົ່ານັ້ນມີຄວາມພໍໃຈເປັນຕົ້ນເຫດ
ຄວາມຫວັງແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ
ຄວາມຫວັງແລະຄວາມສຳເລັດຫວັງຂອງນໍຣະຊົນນັ້ນ
ມີຄວາມພໍໃຈນີ້ເປັນຕົ້ນເຫດ

ຄຳວ່າ ຄວາມພໍໃຈ ໃນຄຳວ່າ ສິ່ງເປັນທີ່ຮັກໃນໂລກມີຄວາມພໍໃຈເປັນຕົ້ນເຫດ ໄດ້ແກ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມມີເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍອຳນາດຄວາມຕ້ອງການ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເຄື່ອງປະກອບ ຄືຄວາມຕ້ອງການ ກິເລດເຄື່ອງຢຶດໝັ້ນຄືຄວາມຕ້ອງການ ກິເລດເຄື່ອງກັ້ນຈິດຄືຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍ

ອີກໄນໜຶ່ງ ຄວາມພໍໃຈ ໕ ຢ່າງ ຄື

໑. ຄວາມພໍໃຈໃນການສະແຫວງຫາ
໒. ຄວາມພໍໃຈໃນການໄດ້
໓. ຄວາມພໍໃຈໃນການບໍຣິໂພກ
໔. ຄວາມພໍໃຈໃນການສະສົມ
໕. ຄວາມພໍໃຈໃນການສະລະ

ຄວາມພໍໃຈໃນການສະແຫວງຫາ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ພໍໃຈ ມີຄວາມຕ້ອງການ ເກີດຄວາມພໍໃຈ ກໍສະແຫວງຫາຮູບ ໆລໆ ສຽງ ໆລໆ ກິ່ນ ໆລໆ ຣົດ ໆລໆ ໂຜດຖັບພະ ນີ້ຊື່ວ່າຄວາມພໍໃຈໃນການສະແຫວງຫາ

ຄວາມພໍໃຈໃນການໄດ້ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ພໍໃຈ ມີຄວາມຕ້ອງການ ເກີດຄວາມພໍໃຈ ຍ່ອມໄດ້ຮູບ ໆລໆ ສຽງ ໆລໆ ກິ່ນ ໆລໆ ຣົດ ໆລໆໂຜດຖັບພະ ນີ້ຊື່ວ່າຄວາມພໍໃຈໃນການໄດ້

ຄວາມພໍໃຈໃນການບໍຣິໂພກ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ພໍໃຈ ມີຄວາມຕ້ອງການ ເກີດຄວາມພໍໃຈ ຍ່ອມບໍຣິໂພກຮູບ ໆລໆສຽງ ໆລໆກິ່ນ ໆລໆຣົດ ໆລໆໂຜດຖັບພະ ນີ້ຊື່ວ່າຄວາມພໍໃຈໃນການບໍຣິໂພກ

ຄວາມພໍໃຈໃນການສະສົມ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ພໍໃຈ ມີຄວາມຕ້ອງການ ເກີດຄວາມພໍໃຈ ຍ່ອມທຳການ ສະສົມຊັບ ດ້ວຍຫວັງວ່າ ຈັກມີປະໂຫຍດໃນເວລາເກີດອັນຕະລາຍ ນີ້ຊື່ວ່າຄວາມພໍໃຈໃນການສະສົມ

ຄວາມພໍໃຈໃນການສະລະ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ພໍໃຈ ມີຄວາມຕ້ອງການ ເກີດຄວາມພໍໃຈ ຍ່ອມສະລະຊັບໃຫ້ແກ່ພົນຊ້າງ ພົນມ້າ ພົນລົດ ພົນທະນູ ພົນຍ່າງ ດ້ວຍຄິດວ່າ ຄົນເຫຼົ່ານີ້ ຈັກຮັກສາ ປົກປ້ອງຫ້ອມລ້ອມເຮົາ ນີ້ຊື່ວ່າຄວາມພໍໃຈໃນການສະລະ

## ວ່າດ້ວຍສິ່ງເປັນທີ່ຮັກ ໘ ຈຳພວກ

ຄຳວ່າ ສິ່ງເປັນທີ່ຮັກ ໄດ້ແກ່ ສິ່ງເປັນທີ່ຮັກ ໘ ຈຳພວກ ຄື (໑) ສັດ (໘) ສັງຂານ ຫລື ສັດເຫຼົ່ານີ້ ຊື່ວ່າສິ່ງເປັນທີ່ຮັກ ຫລື ສັງຂານເຫຼົ່ານີ້ຊື່ວ່າສິ່ງເປັນທີ່ຮັກ

ຄຳວ່າ ສິ່ງເປັນທີ່ຮັກໃນໂລກມີຄວາມພໍໃຈເປັນຕົ້ນເຫດ ອະທິບາຍວ່າ ສິ່ງເປັນທີ່ຮັກ ມີຄວາມພໍໃຈເປັນຕົ້ນເຫດ ຄື ມີຄວາມພໍໃຈເປັນເຫດເກີດ ມີຄວາມພໍໃຈເປັນກຳເນີດ ມີຄວາມພໍໃຈເປັນແດນເກີດ ລວມຄວາມວ່າ ສິ່ງເປັນທີ່ຮັກໃນໂລກມີຄວາມພໍໃຈເປັນຕົ້ນເຫດ

ຄຳວ່າ ຊົນເຫຼົ່າໃດ ໃນຄຳວ່າ ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນ ຄວາມໂລບ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລຶຫັດ ບັນພະຊິດ ເທວະດາ ແລະມະນຸດ

ຄຳວ່າ ຍ້ອນຄວາມໂລບ ໄດ້ແກ່ ຄວາມໂລບ ກິຣິຍາທີ່ໂລບ ພາວະທີ່ໂລບ ຄວາມ ກຳໜັດແຮງ ກິຣິຍາທີ່ກຳໜັດແຮງ ພາວະທີ່ກຳໜັດແຮງ ອະພິດຊາ ອະກຸສົນມູນຄືໂລພະ

ຄຳວ່າ ທ່ອງທ່ຽວໄປ ໄດ້ແກ່ ທ່ອງທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຫລືໃນອາຍະຕະນະໂລກ ລວມຄວາມວ່າ ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ

## ວ່າດ້ວຍຄວາມຫວັງ

ຄຳວ່າ ຄວາມຫວັງແລະຄວາມສຳເລັດຫວັງຂອງນໍຣະຊົນນັ້ນມີຄວາມພໍໃຈນີ້ເປັນຕົ້ນເຫດ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມຫວັງ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຫລື ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ຄວາມສຳເລັດຫວັງ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ ເມື່ອສະແຫວງຫາຮູບກໍໄດ້ຮູບ ເປັນຜູ້ສົມຫວັງໃນຮູບ ເມື່ອສະແຫວງຫາສຽງ ຫລືກິ່ນ ຫລືຣົດ ຫລື ໂຜດຖັບພະ ຫລື ຕະກູນ ຫລື ໝູ່ຄະນະ ຫລື ອາວາດ ຫລື ລາບ ຫລື ຍົດ ຫລື ສັນເສີນ ຫລື

ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ພຣະສູດ ຯລຯ ພຣະວິໄນ ຯລຯ ພຣະອະພິທຳ ຯລຯ ອາຣັນຍິກັງຄະທຸດົງ ຯລຯ ປິນດະປາຕິກັງຄະທຸດົງ ຯລຯ ປັງສຸກູລິກັງຄະທຸດົງ ຯລຯ ເຕຈີວະຣິກັງຄະທຸດົງ ຯລຯ ສະປະທານະຈາຣິກັງຄະທຸດົງ ຯລຯ ຂະລຸປັດສາພັດຕິກັງຄະທຸດົງ ຯລຯ ເນສັດຊິກັງຄະທຸດົງ ຯລຯ ຍະຖາສັນຖະຕິກັງຄະທຸດົງ ຯລຯ ປະຖົມຊານ ຯລຯ ທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ຯລຯ ອາກາສານັນຈາຍະຕະນະສະມາບັດ ຯລຯ ວິນຍານັນຈາຍະຕະນະສະມາບັດ ຯລຯ ອາກິນຈັນຍາຍະຕະນະສະມາບັດ ຯລຯ ເມື່ອສະແຫວງຫາ ເນວະສັນຍານາສັນຍາຍະຕະນະສະມາບັດ ກໍໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ເປັນຜູ້ສົມຫວັງໃນເນວະສັນຍານາສັນຍາຍະຕະນະສະມາບັດ (ສົມຈິງດັ່ງທີ່ພຣະກາລຸທາຍີຂາບທູນພຣະຜູ້ມີພຣະພາກເຈົ້າວ່າ)

ຊາວນາໄຖນາກໍດ້ວຍຫວັງຜົນ ຫວ່ານພືດກໍດ້ວຍຫວັງຜົນ
พວກພໍ່ຄ້າທ່ຽວຫາຊັບແລ່ນເຮືອໄປສູ່ມະຫາສະມຸດກໍດ້ວຍຫວັງຜົນ
ຂ້າພຣະອົງຢູ່ໃນບ່ອນນີ້ດ້ວຍຄວາມຫວັງອັນໃດ
ຂໍຄວາມຫວັງອັນນັ້ນຂອງຂ້າພຣະອົງຈົ່ງສຳເລັດເທີ້ນ
ຄວາມສຳເລັດຕາມຄວາມຫວັງ ຕັດຮຽກວ່າ ຄວາມສຳເລັດຫວັງ

ຄຳວ່າ ຄວາມຫວັງແລະຄວາມສຳເລັດຫວັງຂອງນໍຣະຊົນນັ້ນ ມີຄວາມພໍໃຈນີ້ເປັນຕົ້ນເຫດ ອະທິບາຍວ່າ ຄວາມຫວັງແລະຄວາມສຳເລັດຫວັງ ມີຄວາມພໍໃຈນີ້ເປັນຕົ້ນເຫດ ມີຄວາມພໍໃຈເປັນເຫດເກີດ ມີຄວາມພໍໃຈເປັນກຳເນີດ ມີຄວາມພໍໃຈເປັນແດນເກີດ ລວມຄວາມວ່າ ຄວາມຫວັງແລະຄວາມສຳເລັດຫວັງ ມີຄວາມພໍໃຈນີ້ເປັນຕົ້ນເຫດ

ຄຳວ່າ ຄວາມຫວັງແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ ອະທິບາຍວ່າ ຄວາມຫວັງແລະຄວາມສຳເລັດຫວັງໃດ ເປັນທີ່ໄປໃນເບື້ອງໜ້າ ເປັນເກາະ ເປັນທີ່ຕ້ານທານ ເປັນທີ່ຫຼົບຫຼີກ ເປັນທີ່ເພິ່ງຂອງນໍຣະຊົນ ຄື ນໍຣະຊົນເປັນຜູ້ມີຄວາມສຳເລັດຫວັງເປັນທີ່ໄປໃນເບື້ອງໜ້າ ລວມຄວາມວ່າ ຄວາມຫວັງແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ສິ່ງເປັນທີ່ຮັກໃນໂລກມີຄວາມພໍໃຈເປັນຕົ້ນເຫດ
ແລະຊົນເຫຼົ່າໃດທ່ອງທ່ຽວໄປໃນໂລກຍ້ອນຄວາມໂລບ
ຄວາມໂລບຂອງຊົນເຫຼົ່ານັ້ນມີຄວາມພໍໃຈເປັນຕົ້ນເຫດ
ຄວາມຫວັງແລະຄວາມສຳເລັດຫວັງໃດຈະມີແກ່ນໍຣະຊົນໃນພົບໜ້າ
ຄວາມຫວັງແລະຄວາມສຳເລັດຫວັງຂອງນໍຣະຊົນນັ້ນ
ມີຄວາມພໍໃຈນີ້ເປັນຕົ້ນເຫດ

[໑໐໑] (ພຣະພຸດທະເນຣະມິດທູນຖາມວ່າ)

ສັນທະໃນໂລກມີຕົ້ນເຫດມາຈາກໃສ
ແລະການຕັດສິນໃຈມີມາຈາກໃສ
ອັນໜຶ່ງ ຄວາມໂກດ ຄວາມເປັນຄົນເວົ້າຕົວະ
ແລະຄວາມສົງໄສມີມາຈາກອັນໃດ
ແລະທຳເຫຼົ່າໃດພຣະສະມະນະຕັດໄວ້ແລ້ວ
ທຳເຫຼົ່ານັ້ນມີມາຈາກອັນໃດ

## ວ່າດ້ວຍສັນທະເປັນຕົ້ນ ມີອັນໃດເປັນຕົ້ນເຫດ

ຄຳວ່າ ສັນທະໃນໂລກມີຕົ້ນເຫດມາຈາກໃສ ອະທິບາຍວ່າ ພຣະພຸດທະເນຣະມິດທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດເຖິງມູນ ໆລໆເຫດເກີດແຫ່ງສັນທະວ່າ ສັນທະມີຕົ້ນເຫດມາຈາກໃສ ຄື ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຈາກໃສ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ສັນທະໃນໂລກມີຕົ້ນເຫດມາຈາກໃສ

ຄຳວ່າ ແລະການຕັດສິນໃຈມີມາຈາກໃສ ອະທິບາຍວ່າ ພຣະພຸດທະເນຣະມິດທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດເຖິງມູນ ໆລໆເຫດເກີດແຫ່ງການຕັດສິນໃຈວ່າ ການຕັດສິນໃຈມີມາຈາກໃສ ຄື ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຈາກໃສ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດ ເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ແລະການຕັດສິນໃຈມີມາຈາກໃສ

ຄຳວ່າ ຄວາມໂກດ ໃນຄຳວ່າ ຄວາມໂກດ ຄວາມເປັນຄົນເວົ້າຕົວະ ແລະຄວາມ ສົງໄສ ອະທິບາຍວ່າ ໃຈປອງຮ້າຍ ມຸ້ງຮ້າຍ ຂັດເຄືອງ ຂຸ່ນເຄືອງ ເຄືອງ ເຄືອງຫຼາຍ ເຄືອງຕະຫຼອດ ຊັງ ຊິງຊັງ ກຽດຊັງ ໃຈພະຍາບາດ ໃຈແຄ້ນເຄືອງ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມໂກດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດເຫັນປານນີ້

ມຸສາວາທະ ຕັດຮຽກວ່າ ຄວາມເປັນຄົນເວົ້າຕົວະ ຄວາມລັງເລ ຕັດຮຽກວ່າ ຄວາມສົງໄສ ລວມຄວາມວ່າ ຄວາມໂກດ ຄວາມເປັນຄົນເວົ້າຕົວະ ແລະຄວາມສົງໄສ

ຄຳວ່າ ແລະທຳເຫຼົ່າໃດ ໃນຄຳວ່າ ແລະທຳເຫຼົ່າໃດພຣະສະມະນະຕັດໄວ້ແລ້ວ ອະທິບາຍວ່າ ທຳເຫຼົ່າໃດ ດຳເນີນໄປພ້ອມກັນ ຄື ເກີດພ້ອມກັນ ກ່ຽວຂ້ອງກັນ ປະກອບກັນ ເກີດເອ

ລາດງອກັນ ດັບເວລາດງອກັນ ມີວັດຖຸຢ່າງດງອກັນ ມີອາລົມຢ່າງດງອກັນກັບຄວາມໂກດ ຄວາມເປັນຄົນເວົ້າຕົວະ ແລະຄວາມສົງໄສ ທຳເຫຼົ່ານີ້ຕັດຮຽກວ່າ ທຳເຫຼົ່າໃດ

ອີກໄນໜຶ່ງ ກິເລດເຫຼົ່າໃດມີຊາດເປັນຢ່າງອື່ນ ຕັ້ງຢູ່ແລ້ວໂດຍອາການອື່ນ ກິເລດເຫຼົ່ານີ້ຕັດຮຽກວ່າ ທຳເຫຼົ່າໃດ

ຄຳວ່າ ພຣະສະມະນະຕັດໄວ້ແລ້ວ ໄດ້ແກ່ ພຣະສະມະນະ ຄື ຜູ້ມີບາບສະງົບແລ້ວເປັນພາມ ຜູ້ລອຍບາບທຳແລ້ວ ເປັນພິກຂຸຜູ້ຕັດມູນແຫ່ງກິເລດແລ້ວ ຜູ້ພົ້ນແລ້ວຈາກເຄື່ອງຜູກຄືອະກຸສົນມູນທຸກຢ່າງ ຕັດໄວ້ແລ້ວ ຄື ຊົງເວົ້າ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດໄວ້ແລ້ວ ລວມຄວາມວ່າ ແລະທຳເຫຼົ່າໃດພຣະສະມະນະ ຕັດໄວ້ແລ້ວ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ສັນທະໃນໂລກມີຕົ້ນເຫດມາຈາກໃສ
ແລະການຕັດສິນໃຈມີມາຈາກໃສ
ອັນໜຶ່ງ ຄວາມໂກດ ຄວາມເປັນຄົນເວົ້າຕົວະ
ແລະຄວາມສົງໄສມີມາຈາກອັນໃດ
ແລະທຳເຫຼົ່າໃດພຣະສະມະນະຕັດໄວ້ແລ້ວ
ທຳເຫຼົ່ານັ້ນມີມາຈາກອັນໃດ

[໑໐໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຊົນທັງຫຼາຍໃນໂລກເວົ້າເຖິງສິ່ງໃດວ່າ ໜ້າດີໃຈ ໜ້າເສຍໃຈ
ສັນທະກໍຈະມີຂຶ້ນຍ້ອນອາໄສສິ່ງນັ້ນ
ຊົນໃນໂລກແນມເຫັນຄວາມເສື່ອມ
ແລະຄວາມຈະເລີນໃນຮູບທັງຫຼາຍແລ້ວ ຍ່ອມທຳການຕັດສິນໃຈ

ຄຳວ່າ ໜ້າດີໃຈ ໃນຄຳວ່າ ຊົນທັງຫຼາຍໃນໂລກເວົ້າເຖິງສິ່ງໃດວ່າ ໜ້າດີໃຈ ໜ້າເສຍໃຈໄດ້ແກ່ ສຸກຂະເວທະນາ ແລະສິ່ງທີ່ໜ້າປາຖະໜາ

ຄຳວ່າ ໜ້າເສຍໃຈ ໄດ້ແກ່ ທຸກຂະເວທະນາ ແລະສິ່ງທີ່ບໍ່ໜ້າປາຖະໜາ

ຄຳວ່າ ຊົນທັງຫຼາຍໃນໂລກເວົ້າເຖິງສິ່ງໃດ ໄດ້ແກ່ ເວົ້າເຖິງສິ່ງໃດ ຄື ກ່າວເຖິງ ບອກເຖິງ ສະແດງເຖິງ ຊີ້ແຈ່ງເຖິງສິ່ງໃດ ລວມຄວາມວ່າ ຊົນທັງຫຼາຍໃນໂລກເວົ້າເຖິງສິ່ງໃດວ່າ ໜ້າດີໃຈ ໜ້າເສຍໃຈ

ຄຳວ່າ ສັນທະກໍຈະມີຂຶ້ນຍ້ອນອາໄສສິ່ງນັ້ນ ອະທິບາຍວ່າ ສັນທະ ຍ່ອມມີ ມີຂຶ້ນ ຄືເກີດ ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຍ້ອນອາໄສຄວາມໜ້າດີໃຈແລະໜ້າເສຍໃຈ ຄື ອາໄສສຸກ

ແລະທຸກ ໂສມະນັດແລະໂທມະນັດ ສິ່ງທີ່ໜ້າປາຖະໜາແລະບໍ່ໜ້າປາຖະໜາ ຄວາມຍິນດີແລະຄວາມຍິນຮ້າຍ ລວມຄວາມວ່າ ສັນທະກໍຈະມີຂຶ້ນຍ້ອນອາໄສສິ່ງນັ້ນ

## ວ່າດ້ວຍຄວາມເກີດແຫ່ງຮູບ

ຄຳວ່າ ໃນຮູບທັງຫຼາຍ ໃນຄຳວ່າ ເບິ່ງເຫັນຄວາມເສື່ອມ ແລະຄວາມຈະເລີນໃນຮູບທັງຫຼາຍແລ້ວ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔

ຄວາມຈະເລີນແຫ່ງຮູບທັງຫຼາຍ ເປັນແນວໃດ?

ຄື ຄວາມຈະເລີນ ຄວາມເກີດ ຄວາມເກີດຂຶ້ນ ຄວາມບັງເກີດ ຄວາມບັງເກີດຂຶ້ນ ຄວາມຜາກົດແຫ່ງຮູບທັງຫຼາຍ ນີ້ຊື່ວ່າຄວາມຈະເລີນແຫ່ງຮູບທັງຫຼາຍ

ຄວາມເສື່ອມແຫ່ງຮູບທັງຫຼາຍ ເປັນແນວໃດ?

ຄື ຄວາມສິ້ນໄປ ຄວາມເສື່ອມໄປ ຄວາມແຕກໄປ ຄວາມທຳລາຍໄປ ຄວາມເປັນທຳມະຊາດບໍ່ທ່ຽງ ຄວາມສູນຫາຍໄປແຫ່ງຮູບທັງຫຼາຍ ນີ້ຊື່ວ່າ ຄວາມເສື່ອມແຫ່ງຮູບທັງຫຼາຍ

ຄຳວ່າ ເບິ່ງເຫັນຄວາມເສື່ອມ ແລະຄວາມຈະເລີນໃນຮູບທັງຫຼາຍແລ້ວ ໄດ້ແກ່ ເຫັນແລ້ວ ຄື ແນມເຫັນແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ ເຊິ່ງຄວາມຈະເລີນ ແລະຄວາມເສື່ອມໃນຮູບທັງຫຼາຍ ລວມຄວາມວ່າ ເບິ່ງເຫັນຄວາມເສື່ອມແລະຄວາມຈະເລີນໃນຮູບທັງຫຼາຍແລ້ວ

## ວ່າດ້ວຍການຕັດສິນໃຈ

ຄຳວ່າ ຊົນໃນໂລກ ຯລຯ ຍ່ອມທຳການຕັດສິນໃຈ ອະທິບາຍວ່າ

ຄຳວ່າ ການຕັດສິນໃຈ ໄດ້ແກ່ ການຕັດສິນໃຈ ໒ ຢ່າງ ຄື (໑) ການຕັດສິນໃຈດ້ວຍອຳນາດຕັນຫາ (໒) ການຕັດສິນໃຈດ້ວຍອຳນາດທິດຖິ

ຊົນຍ່ອມທຳການຕັດສິນໃຈດ້ວຍອຳນາດຕັນຫາ ເປັນແນວໃດ?

ຄື ສຳລັບຄົນບາງຄົນໃນໂລກນີ້ ໂພຄະຊັບທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ແລະໂພຄະຊັບທີ່ເກີດຂຶ້ນແລ້ວຍ່ອມເຖິງຄວາມໝົດສິ້ນໄປ ເຂົາມີຄວາມຄິດແນວນີ້ວ່າ ຍ້ອນອຸບາຍອັນໃດນໍ ໂພຄະຊັບທີ່ຍັງບໍ່ເກີດຂຶ້ນແກ່ເຮົາ ຈຶ່ງບໍ່ເກີດຂຶ້ນ ແລະໂພຄະຊັບທີ່ເກີດຂຶ້ນແລ້ວ ຈຶ່ງເຖິງຄວາມສິ້ນໄປ ເຂົາກໍມີຄວາມຄິດຕໍ່ໄປແນວນີ້ວ່າ ເມື່ອເຮົາມົວແຕ່ດື່ມນ້ຳເມົາ ຄື ສຸຣາ ແລະເມໄຣອັນເປັນບ່ອນຕັ້ງແຫ່ງຄວາມຜະໝາດ ໂພຄະຊັບທີ່ຍັງບໍ່ເກີດ ກໍບໍ່ເກີດຂຶ້ນ ແລະໂພຄະຊັບທີ່ເກີດຂຶ້ນແລ້ວກໍເຖິງຄວາມໝົດສິ້ນໄປ ເມື່ອເຮົາມົວແຕ່ທ່ຽວກາງຄືນ ຯລຯ ເມື່ອເຮົາມົວແຕ່ທ່ຽວເບິ່ງມະໂຫ

ລະສົບ ฯລฯ ເມື່ອເຮົາມົວແຕ່ຢູ່ໃນຄວາມຜະໝາດດ້ວຍການຫຼິ້ນການພະນັນ ฯລฯ ເມື່ອເຮົາມົວແຕ່ຄົບຄົນຊົ່ວເປັນມິດ ฯລฯ ເມື່ອເຮົາມົວແຕ່ຂີ້ຄ້ານ ໂພຄະຊັບທີ່ຍັງບໍ່ເກີດກໍບໍ່ເກີດຂຶ້ນ ໂພຄະຊັບທີ່ເກີດຂຶ້ນແລ້ວກໍເຖິງຄວາມໝົດສິ້ນໄປ ເມື່ອຮູ້ແນວນີ້ແລ້ວ ຈຶ່ງບໍ່ປະພຶດສິ່ງທີ່ເປັນທາງເສື່ອມແຫ່ງໂພຄະຊັບ ໖ ປະການ ປະພຶດແຕ່ສິ່ງທີ່ເປັນທາງຈະເລີນແຫ່ງໂພຄະຊັບ ໖ ປະການ ຊົນຍ່ອມທຳການຕັດສິນໃຈດ້ວຍອຳນາດຕັນຫາເປັນແນວນີ້

ອີກໄນໜຶ່ງ ບຸກຄົນຍ່ອມດຳເນີນຊີວິດດ້ວຍກະສິກຳ ພານິດຊະກຳ ໂຄຣັກຂະກຳ (ລ້ຽງປະສຸສັດ) ສາດແຫ່ງການຍິງທະນູ ການຮັບຣາດຊະການ ຫຼື ດ້ວຍສິລະປະແນວໃດແນວໜຶ່ງ ຊົນຍ່ອມທຳການຕັດສິນໃຈດ້ວຍອຳນາດຕັນຫາ ເປັນແນວນີ້

ຊົນຍ່ອມທຳການຕັດສິນໃຈດ້ວຍອຳນາດທິດຖິ ເປັນແນວໃດ?

ຄື ເມື່ອຕາເກີດຂຶ້ນ ກໍເຂົ້າໃຈວ່າ ຕົວຂອງເຮົາເກີດຂຶ້ນແລ້ວ ເມື່ອຕາຫາຍໄປກໍເຂົ້າໃຈວ່າ ຕົວຂອງເຮົາຫາຍໄປແລ້ວ ຕົວຂອງເຮົາບໍ່ມີສາແລ້ວ ຊົນຍ່ອມທຳການຕັດສິນໃຈດ້ວຍອຳນາດທິດຖິເປັນແນວນີ້ ເມື່ອຫູ ฯລฯ ດັງ ฯລฯ ລີ້ນ ฯລฯ ກາຍ ฯລฯ ຮູບ ฯລฯ ສຽງ ฯລฯ ກິ່ນ ฯລฯ ຣົດ ฯລฯ ເມື່ອໂຜດຖັບພະເກີດຂຶ້ນ ກໍເຂົ້າໃຈວ່າ ຕົວຂອງເຮົາເກີດຂຶ້ນແລ້ວ ເມື່ອໂຜດຖັບພະຫາຍໄປກໍ ເຂົ້າໃຈວ່າ ຕົວຂອງເຮົາຫາຍໄປແລ້ວ ຕົວຂອງເຮົາບໍ່ມີສາແລ້ວ ຊົນຍ່ອມເຮັດຄືໃຫ້ເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນເຊິ່ງການຕັດສິນໃຈດ້ວຍອຳນາດທິດຖິເປັນແນວນີ້

ຄຳວ່າ ຊົນ ໄດ້ແກ່ ສັດ ນໍຣະຊົນ ມານົບ ฯລฯ ມະນຸດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ฯລฯ ໃນອາຍະຕະນະໂລກ ລວມຄວາມວ່າ ຊົນໃນໂລກຍ່ອມທຳການຕັດສິນໃຈ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ຊົນທັງຫຼາຍໃນໂລກເວົ້າເຖິງສິ່ງໃດວ່າ ໜ້າດີໃຈ ໜ້າເສຍໃຈ
ສັນທະກໍຈະມີຂຶ້ນຍ້ອນອາໄສສິ່ງນັ້ນ
ຊົນໃນໂລກແນມເຫັນຄວາມເສື່ອມ
ແລະຄວາມຈະເລີນໃນຮູບທັງຫຼາຍແລ້ວ ຍ່ອມທຳການຕັດສິນໃຈ

[໑໐໓] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ທຳແມ່ນເຫຼົ່ານີ້ ຄື ຄວາມໂກດ ຄວາມເປັນຄົນເວົ້າຕົວະ
ແລະຄວາມສົງໄສ ເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່ ກໍມີ
ບຸກຄົນຜູ້ມີຄວາມສົງໄສ ເພິ່ງສຶກສາເພື່ອທາງແຫ່ງຍານ
ແລະທຳເຫຼົ່າໃດພຣະສະມະນະຊົງຮູ້ແລ້ວຕັດໄວ້
ທຳເຫຼົ່ານັ້ນ ເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່ ກໍມີ

ຄຳວ່າ ຄວາມໂກດ ໃນຄຳວ່າ ຄວາມໂກດ ຄວາມເປັນຄົນເວົ້າຕົວະ ແລະຄວາມ ສົງໄສ ໄດ້ແກ່ ໃຈປອງຮ້າຍ ມຸ້ງຮ້າຍ ຯລຯ ເຫັນປານນີ້ ມຸສາວາດ ຕັດຮຽກວ່າ ຄວາມເປັນຄົນເວົ້າຕົວະ ຄວາມລັງເລ ຕັດຮຽກວ່າ ຄວາມສົງໄສ ຄວາມໂກດຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາແດ່ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາແດ່ ມຸສາວາດຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາແດ່ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາແດ່ ຄວາມສົງໄສຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາແດ່ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາແດ່

## ວ່າດ້ວຍເຫດໃຫ້ເກີດຄວາມໂກດ

ຄວາມໂກດຍ່ອມເກີດ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາ ເປັນແນວໃດ?

ຄື ຄວາມໂກດຍ່ອມເກີດຍ້ອນສຳຄັນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ຄວາມໂກດຍ່ອມເກີດຍ້ອນສຳຄັນວ່າ ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ຄວາມໂກດຍ່ອມເກີດຍ້ອນສຳຄັນວ່າ ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ຄວາມໂກດຍ່ອມເກີດຍ້ອນສຳຄັນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດ ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດ ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ມັກຂອງເຮົາ ຄວາມໂກດຍ່ອມເກີດ ຍ້ອນສຳຄັນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດ ກຳລັງເຮັດສິ່ງທີ່ເປັນປະໂຫຍດ ຈັກເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກທີ່ບໍ່ມັກຂອງເຮົາ ຄວາມໂກດຍ່ອມເກີດ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາ ເປັນແນວນີ້

ຄວາມໂກດຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາ ເປັນແນວໃດ?

ຄື ເມື່ອບຸກຄົນຫວາດຣະແວງວ່າສິ່ງທີ່ໜ້າປາຖະໜາຈະຖືກແຍ່ງຊີງໄປ ກໍເກີດຄວາມໂກດ ເມື່ອສິ່ງທີ່ໜ້າປາຖະໜາກຳລັງຖືກແຍ່ງຊີງໄປກໍເກີດຄວາມໂກດ ເມື່ອສິ່ງທີ່ໜ້າປາຖະໜາຖືກແຍ່ງຊີງໄປແລ້ວ ກໍເກີດຄວາມໂກດ ເມື່ອບຸກຄົນຫວາດຣະແວງວ່າ ສິ່ງທີ່ໜ້າປາຖະໜາຈະຜັນປ່ຽນໄປ ກໍເກີດຄວາມໂກດ ເມື່ອສິ່ງທີ່ໜ້າປາຖະໜາກຳລັງຜັນປ່ຽນໄປ ກໍເກີດຄວາມໂກດ ເມື່ອສິ່ງທີ່ໜ້າປາຖະໜາຜັນປ່ຽນໄປແລ້ວ ກໍເກີດຄວາມໂກດ ຄວາມໂກດຍ່ອມເກີດ ຍ້ອນ ອາໄສສິ່ງທີ່ໜ້າປາຖະໜາ ເປັນແນວນີ້

## ວ່າດ້ວຍເຫດໃຫ້ເກີດການກ່າວຕົວະ

ມຸສາວາດຍ່ອມເກີດ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ຖືກຈອງຈຳດ້ວຍເຄື່ອງຈອງຈຳຄືຂື່ຄາ ກໍເວົ້າຕົວະທັງທີ່ຮູ້ ເພື່ອໃຫ້ພົ້ນການຈອງຈຳນັ້ນ ຖືກມັດດ້ວຍເຄື່ອງຈອງຈຳຄືເຊືອກ ຯລຯ ຖືກຈອງຈຳດ້ວຍເຄື່ອງຈອງຈຳຄືໂຊ່ຕວນ ຯລຯ ຖືກມັດດ້ວຍເຄື່ອງຈອງຈຳຄືຫວາຍ ຯລຯ ຖືກມັດດ້ວຍເຄື່ອງຈອງຈຳຄື ຄືເຄືອເຂົາ ຯລຯ ຖືກຈອງຈຳດ້ວຍເຄື່ອງຈອງຈຳຄືຄຸກ ຯລຯ ຖືກຈອງຈຳດ້ວຍເຄື່ອງຈອງຈຳຄື

ການລ້ອມຮົ້ວ ຯລຯ ຖືກຈອງຈຳໄວ້ພາຍໃນບ້ານ ນິຄົມ ເມືອງ ຫຼືຣັດ ຯລຯ ຫຼືຖືກຈອງຈຳໄວ້ພາຍໃນ ຊົນນະບົດ ກໍເວົ້າຕົວະທັງທີ່ຮູ້ ເພື່ອໃຫ້ພົ້ນການຈອງຈຳນັ້ນ ມຸສາວາດຍ່ອມເກີດ ຍ້ອນອາໄສສິ່ງ ທີ່ບໍ່ໜ້າປາຖະໜາ ເປັນແນວນີ້

ມຸສາວາດຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ເວົ້າຕົວະທັງທີ່ຮູ້ ຍ້ອນເຫດແຫ່ງຮູບທີ່ໜ້າພໍໃຈ ເວົ້າຕົວະທັງທີ່ຮູ້ ຍ້ອນເຫດແຫ່ງສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະທີ່ພໍໃຈ ຯລຯ ຍ້ອນເຫດແຫ່ງຈີວອນ ຯລຯ ຍ້ອນເຫຸດແຫ່ງບິນທະບາດ ຯລຯ ຍ້ອນເຫດແຫ່ງເສນາສະນະ ເວົ້າຕົວະທັງທີ່ຮູ້ ຍ້ອນເຫດ ແຫ່ງຄິລານະປັດໄຈເພສັດບໍຣິຂານ ມຸສາວາດຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາເປັນແນວນີ້

## ວ່າດ້ວຍເຫດໃຫ້ເກີດຄວາມສົງໄສ

ຄວາມສົງໄສຍ່ອມເກີດ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາ ເປັນແນວໃດ?

ຄື ຄວາມສົງໄສຍ່ອມເກີດຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາ ດ້ວຍຄິດວ່າ ເຮົາຈັກພົ້ນຈາກໂຣກຕາ ຫຼືບໍ່ພົ້ນຈາກໂຣກຕານໍ ເຮົາຈັກພົ້ນຈາກໂຣກຫູ ຯລຯ ຈາກໂຣກດັງ ຯລຯ ຈາກໂຣກລີ້ນ ຯລຯ ຈາກໂຣກກາຍ ຯລຯ ຈາກໂຣກກ່ຽວກັບຫົວ ຯລຯ ຈາກໂຣກກ່ຽວກັບຫູ ຯລຯ ຈາກໂຣກກ່ຽວກັບປາກ ຯລຯ ຈາກໂຣກກ່ຽວກັບແຂ້ວ ຫຼື ບໍ່ພົ້ນຈາກໂຣກກ່ຽວກັບແຂ້ວນໍ ຄວາມສົງໄສຍ່ອມເກີດ ຍ້ອນອາໄສສິ່ງທີ່ບໍ່ໜ້າປາຖະໜາ ເປັນແນວນີ້

ຄວາມສົງໄສຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາ ເປັນແນວໃດ?

ຄື ຄວາມສົງໄສຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາດ້ວຍຄິດວ່າ ເຮົາຈັກໄດ້ຮູບທີ່ໜ້າພໍໃຈ ຫຼືບໍ່ໄດ້ຮູບທີ່ໜ້າພໍໃຈນໍ ເຮົາຈັກໄດ້ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຫຼື ບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານນໍ ຄວາມສົງໄສຍ່ອມເກີດ ຍ້ອນອາໄສສິ່ງທີ່ໜ້າປາຖະໜາ ເປັນແນວນີ້ ລວມຄວາມວ່າ ຄວາມໂກດ ຄວາມເປັນຄົນເວົ້າຕົວະແລະຄວາມສົງໄສ

ຄຳວ່າ ທຳແມ່ນເຫຼົ່ານີ້ ຯລຯ ເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່ກໍມີ ອະທິບາຍວ່າ ເມື່ອຄວາມດີໃຈແລະຄວາມເສຍໃຈມີຢູ່ ຄື ເມື່ອຄວາມສຸກແລະຄວາມທຸກ ໂສມະນັດແລະໂທມະນັດ ອາລົມທີ່ໜ້າປາຖະໜາ ແລະບໍ່ໜ້າປາຖະໜາ ຄວາມຍິນດີແລະຄວາມຍິນຮ້າຍມີຢູ່ ຄື ຜາກົດຢູ່ ອັນຕົນເຂົ້າໄປໄດ້ຢູ່ ທຳເຫຼົ່ານີ້ກໍມີໄດ້ ລວມຄວາມວ່າ ທຳແມ່ນເຫຼົ່ານີ້ ຯລຯ ເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່ກໍມີ

ຄຳວ່າ ບຸກຄົນຜູ້ມີຄວາມສົງໄສ ເພິ່ງສຶກສາເພື່ອທາງແຫ່ງຍານ ອະທິບາຍວ່າ ຍານ ຊື່ວ່າ ທາງແຫ່ງຍານ ອາລົມແຫ່ງຍານ ຊື່ວ່າທາງແຫ່ງຍານ ທຳທີ່ເກີດມີພ້ອມກັບຍານ ກໍຊື່ວ່າ ທາງແຫ່ງຍານ ປຽບເໝືອນອະຣິຍະມັກ ຊື່ວ່າທາງແຫ່ງອະຣິຍະ ເທວະມັກ ຊື່ວ່າທາງແຫ່ງເທວະ ພົມມັກ ຊື່ວ່າທາງແຫ່ງພົມ ສັນໃດ ຍານ ຊື່ວ່າທາງແຫ່ງຍານ ອາລົມແຫ່ງຍານ ຊື່ວ່າທາງແຫ່ງ ຍານ ທຳທີ່ເກີດມີພ້ອມກັບຍານ ກໍຊື່ວ່າທາງແຫ່ງຍານ ສັນນັ້ນຄືກັນ

## ວ່າດ້ວຍສິກຂາ ໓

ຄຳວ່າ ເພິ່ງສຶກສາ ໄດ້ແກ່ ສິກຂາ ໓ ຢ່າງ ຄື

໑. ອະທິສີລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ອະທິສີລະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ສົມບູນ ດ້ວຍອາຈາຣະແລະໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາໃນສິກຂາບົດຢູ່ ຄື ສີນຂັນນ້ອຍ ສີນຂັນໃຫຍ່ ສີນເປັນບ່ອນເພິ່ງ ເປັນເບື້ອງຕົ້ນ ເປັນຄວາມປະພຶດ ເປັນຄວາມ ສັງລວມ ເປັນຄວາມຣະວັງ ເປັນຫົວໜ້າ ເປັນປະທານເພື່ອຄວາມເຖິງພ້ອມແຫ່ງທຳທີ່ເປັນກຸສົນ ນີ້ຊື່ວ່າອະທິສີລະສິກຂາ

ອະທິຈິດຕະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ຯລຯ ບັນລຸຈະຕຸດຖະຊານຢູ່ ນີ້ຊື່ວ່າອະທິຈິດ ຕະສິກຂາ

ອະທິປັນຍາສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາອັນປະເສີດ ຢັ່ງເຖິງຄວາມ ເກີດແລະຄວາມດັບ ເພີກຖອນກິເລດ ໃຫ້ບັນລຸເຖິງຄວາມສິ້ນທຸກໂດຍຊອບ ທ່ານຮູ້ຕາມຄວາມ ເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ຯລຯ ເຫຼົ່ານີ້ອາສະວະ ທ່ານຮູ້ ຕາມຄວາມເປັນຈິງວ່າ ນີ້ອາສະວະນິໂຣທະຄາມີນີປະຕິປະທາ ນີ້ຊື່ວ່າອະທິປັນຍາສິກຂາ

ຄຳວ່າ ບຸກຄົນຜູ້ມີຄວາມສົງໄສ ເພິ່ງສຶກສາເພື່ອທາງແຫ່ງຍານ ອະທິບາຍວ່າ ບຸກຄົນ ຜູ້ ມີຄວາມສົງໄສ ຄື ເຄືອບແຄງ ລັງເລ ມີຄວາມເຂົ້າໃຈ ໒ ທິດ ໒ ທາງ ບໍ່ແນ່ໃຈ ເພິ່ງສຶກສາ ອະທິສີລະສິກຂາ ອະທິຈິດຕະສິກຂາ ອະທິປັນຍາສິກຂາ ເພື່ອບັນລຸເຖິງຍານ ເພື່ອຖືກຕ້ອງຍານ ເພື່ອເຮັດຍານໃຫ້ແຈ້ງ ຄື

ສິກຂາ ໓ ເຫຼົ່ານີ້ ເມື່ອບຸກຄົນນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຊື່ວ່າເພິ່ງສຶກສາ ເມື່ອເຫັນ ຊື່ວ່າເພິ່ງສຶກສາ ເມື່ອພິຈາລະນາ ຊື່ວ່າເພິ່ງສຶກສາ ເມື່ອອະທິຖານຈິດ ຊື່ວ່າເພິ່ງສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າເພິ່ງສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງສະຕິ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງໃຈໝັ້ນ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າເພິ່ງສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າເພິ່ງສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າເພິ່ງສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າເພິ່ງສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ກໍຊື່ວ່າເພິ່ງສຶກສາ ຄືເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ບຸກຄົນຜູ້ມີຄວາມສົງໄສ ເພິ່ງສຶກສາເພື່ອທາງແຫ່ງຍານ

## ວ່າດ້ວຍທຳທີ່ພຣະສະມະນະຊົງຮູ້

ຄຳວ່າ ຊົງຮູ້ແລ້ວ ໃນຄຳວ່າ ແລະທຳເຫຼົ່າໃດພຣະສະມະນະຊົງຮູ້ແລ້ວຕັດໄວ້ ໄດ້ແກ່ ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ ຕັດສອນຕັດໄວ້ ຄື ຊົງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດໄວ້ແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຯລຯ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ຯລຯ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ ຯລຯ ຍ້ອນຊາດດັບ ຊະຣາມໍຣະນະຈຶ່ງດັບ ຯລຯ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ຯລຯ ເຫຼົ່ານີ້ອາສະວະ ຯລຯ ນີ້ອາສະວະນິໂຣທະຄາມິນີປະຕິປະທາ ຯລຯ ທຳເຫຼົ່ານີ້ຄວນຮູ້ຍິ່ງ ຯລຯ ທຳເຫຼົ່ານີ້ຄວນກຳນົດຮູ້ ຯລຯ ທຳເຫຼົ່ານີ້ຄວນລະ ຯລຯ ທຳເຫຼົ່ານີ້ຄວນຈະເລີນ ຯລຯ ທຳເຫຼົ່ານີ້ຄວນເຮັດໃຫ້ແຈ້ງ ເຫດເກີດເຫດດັບ ຄຸນ ໂທດ ແລະການສະລັດອອກແຫ່ງຜັດສາຍະຕະນະ ໖ ຯລຯ ແຫ່ງອຸປາທານຂັນ໌ ໕ ຯລຯ ແຫ່ງມະຫາພູຕະຮູບ ໔

ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແຈງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ ຕັດສອນ ຕັດໄວ້ ຄື ຊົງບອກ ຊົງສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດໄວ້ແລ້ວວ່າ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ເຮົາສະແດງທຳເພື່ອຄວາມຮູ້ຍິ່ງ ບໍ່ແມ່ນສະແດງເພື່ອຄວາມບໍ່ຮູ້ຍິ່ງ ສະແດງທຳມີເຫດຜົນ ບໍ່ແມ່ນສະແດງທຳບໍ່ມີເຫດຜົນ ສະແດງທຳມີປາຕິຫານ ບໍ່ແມ່ນສະແດງທຳບໍ່ມີປາຕິຫານ ພວກທ່ານຄວນເຮັດຕາມໂອວາດ ເຮັດຕາມຄຳສັ່ງສອນຂອງເຮົານັ້ນ ຜູ້ສະແດງທຳເພື່ອຄວາມຮູ້ຍິ່ງ ບໍ່ແມ່ນສະແດງເພື່ອຄວາມບໍ່ຮູ້ຍິ່ງ ຜູ້ສະແດງທຳມີເຫດຜົນ ບໍ່ແມ່ນສະແດງທຳບໍ່ມີເຫດຜົນ ຜູ້ສະແດງທຳມີປາຕິຫານ ບໍ່ແມ່ນ

ສະແດງທຳບໍ່ມີປາຕິຫານ ກໍເປັນການພຽງພໍເພື່ອຄວາມຍິນດີ ເພື່ອຄວາມປາໂມດ ເພື່ອໂສມະນັດ ວ່າ ພຣະຜູ້ມີພຣະພາກເຈົ້າຕັດສະຮູ້ໂດຍຊອບດ້ວຍພຣະອົງເອງ ພຣະທຳອັນພຣະອົງຕັດໄວ້ດີແລ້ວ ພຣະສົງເປັນຜູ້ປະຕິບັດດີແລ້ວ ຯລຯ ກໍແລ ເມື່ອຕັດໄວຍາກອນພາສິດນີ້ ທັງ ໑໐,໐໐໐ ໂລກກະທາດ ກໍໄດ້ສັ່ນໄຫວແລ້ວ[๑] ລວມຄວາມວ່າ ແລະທຳເຫຼົ່າໃດພຣະ ສະມະນະຊົງຮູ້ແລ້ວ ຕັດໄວ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ທຳແມ່ນເຫຼົ່ານີ້ ຄື ຄວາມໂກດ ຄວາມເປັນຄົນເວົ້າຕົວະ
ແລະຄວາມສົງໄສ ເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່ ກໍມີ
ບຸກຄົນຜູ້ມີຄວາມສົງໄສ ເພິ່ງສຶກສາເພື່ອທາງແຫ່ງຍານ
ແລະທຳເຫຼົ່າໃດພຣະສະມະນະຊົງຮູ້ແລ້ວຕັດໄວ້
ທຳເຫຼົ່ານັ້ນ ເມື່ອຄວາມດີໃຈແລະຄວາມເສຍໃຈທັງສອງມີຢູ່ ກໍມີ

[໑໐໔] (ພຣະພຸດທະເນຣະມິດທູນຖາມວ່າ)

ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກໃສ
ເມື່ອອັນໃດບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ
ຂໍພຣະອົງໂຜດຕັດບອກເລື້ອງຄວາມບໍ່ມີແລະຄວາມມີວ່າ
ມີຕົ້ນເຫດມາຈາກສິ່ງໃດແກ່ຂ້າພຣະອົງ

## ວ່າດ້ວຍຕົ້ນເຫດຄວາມດີໃຈແລະຄວາມເສຍໃຈ

ຄຳວ່າ ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກໃສ ອະທິບາຍວ່າ ພຣະພຸດທະເນຣະມິດທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດເຖິງມູນ ຯລຯເຫດເກີດແຫ່ງຄວາມດີໃຈແລະຄວາມເສຍໃຈວ່າ ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກໃສ ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຂຶ້ນຈາກໃສ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ຄວາມດີໃຈ ແລະຄວາມເສຍໃຈມີຕົ້ນເຫດມາຈາກໃສ

ຄຳວ່າ ເມື່ອອັນໃດບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ ອະທິບາຍວ່າ ເມື່ອອັນໃດບໍ່ມີ ຄື ບໍ່ຜາກົດ ຫາບໍ່ໄດ້ ຄວາມດີໃຈ ແລະຄວາມເສຍໃຈຈຶ່ງບໍ່ມີ ຄື ບໍ່ມີຢູ່ ບໍ່ເກີດ ບໍ່ເກີດຂຶ້ນ ບໍ່ບັງເກີດ ບໍ່ບັງເກີດຂຶ້ນ ລວມຄວາມວ່າ ເມື່ອອັນໃດບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ

ຄຳວ່າ ຯລຯ ເລື້ອງຄວາມບໍ່ມີແລະຄວາມມີວ່າ ມີຕົ້ນເຫດມາຈາກສິ່ງໃດ ອະທິບາຍວ່າ ຄວາມມີແຫ່ງຄວາມດີໃຈ ແລະຄວາມເສຍໃຈ ເປັນແນວໃດ?

ຄື ຄວາມມີ ຄວາມເປັນ ຄວາມເກີດ ຄວາມເກີດຂຶ້ນ ຄວາມບັງເກີດ ຄວາມບັງເກີດຂຶ້ນ ຄວາມຜາກົດແຫ່ງຄວາມດີໃຈ ແລະຄວາມເສຍໃຈ ນີ້ຊື່ວ່າຄວາມມີແຫ່ງຄວາມດີໃຈແລະຄວາມເສຍໃຈ

ຄວາມບໍ່ມີແຫ່ງຄວາມດີໃຈແລະຄວາມເສຍໃຈ ເປັນແນວໃດ?

ຄື ຄວາມສິ້ນໄປ ຄວາມເສື່ອມໄປ ຄວາມແຕກໄປ ຄວາມທຳລາຍໄປ ຄວາມເປັນຂອງບໍ່ທ່ຽງ ຄວາມອັນຕະຣະທານຫາຍໄປແຫ່ງຄວາມດີໃຈ ແລະຄວາມເສຍໃຈ ນີ້ຊື່ວ່າ ຄວາມບໍ່ມີແຫ່ງຄວາມດີໃຈແລະຄວາມເສຍໃຈ

ຄຳວ່າ ເລື້ອງ ໄດ້ແກ່ ເລື້ອງສຳຄັນຍິ່ງ ລວມຄວາມວ່າ ເລື້ອງຄວາມບໍ່ມີ ແລະຄວາມມີ

ຄຳວ່າ ນີ້ ໃນຄຳວ່າ ຂໍພຣະອົງໂຜດຕັດບອກ ໆລໆ ນີ້ວ່າ ມີຕົ້ນເຫດມາຈາກສິ່ງໃດ ແກ່ຂ້າພຣະອົງ ໄດ້ແກ່ ຂໍ້ທີ່ຂ້າພຣະອົງທູນຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດ

ຄຳວ່າ ຂໍພຣະອົງໂຜດຕັດບອກ ໆລໆ ວ່າ ມີຕົ້ນເຫດມາຈາກສິ່ງໃດ ໄດ້ແກ່ສິ່ງທີ່ເປັນຕົ້ນເຫດ ສິ່ງທີ່ເປັນເຫດເກີດ ສິ່ງທີ່ເປັນກຳເນີດ ສິ່ງທີ່ເປັນແດນເກີດ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກ ໆລໆ ວ່າມີຕົ້ນເຫດມາຈາກສິ່ງໃດ ແກ່ຂ້າພຣະອົງ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດ ຈຶ່ງທູນຖາມວ່າ

ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກໃສ
ເມື່ອອັນໃດບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ
ຂໍພຣະອົງໂຜດຕັດບອກເລື້ອງຄວາມບໍ່ມີແລະຄວາມມີວ່າ
ມີຕົ້ນເຫດມາຈາກສິ່ງໃດແກ່ຂ້າພຣະອົງ

[໑໐໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກຜັດສະ
ເມື່ອຜັດສະບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ
ເຮົາຂໍບອກເລື້ອງຄວາມບໍ່ມີແລະຄວາມມີນີ້ວ່າ
ມີຕົ້ນເຫດມາຈາກຜັດສະນີ້ແກ່ທ່ານ

ຄຳວ່າ ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກຜັດສະ ອະທິບາຍວ່າ ສຸກຂະເວທະນາ (ຄວາມຮູ້ສຶກສະບາຍ) ເກີດຂຶ້ນຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງສຸກຂະເວທະນາ ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງສຸກຂະເວທະນານັ້ນ ໆແລດັບໄປ ສຸກຂະເວທະນາທີ່ເກີດຂຶ້ນຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງສຸກຂະເວທະນາ ທີ່ສະເຫວີຍຢູ່ ອັນເກີດຈາກຜັດສະນັ້ນ ກໍດັບໄປ ຄື ສະງົບໄປ

ທຸກຂະເວທະນາ (ຄວາມຮູ້ສຶກບໍ່ສະບາຍ) ເກີດຂຶ້ນຍ້ອນອາໄສຜັດສະ ອັນເປັນທີ່ຕັ້ງແຫ່ງທຸກຂະເວທະນາ ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນານັ້ນ ໆ ເອງ ດັບໄທຸກຂະເວທະນາທີ່ເກີດຂຶ້ນ ຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທີ່ສະເຫວີຍຢູ່ ອັນເກີດຈາກຜັດສະນັ້ນ ກໍດັບໄປ ຄື ສະງົບໄປ

ອະທຸກຂະມະສຸຂະເວທະນາ (ຄວາມຮູ້ສຶກບໍ່ທຸກບໍ່ສຸກ) ເກີດຂຶ້ນຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸຂະເວທະນາ ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸຂະເວທະນານັ້ນ ໆແລ ດັບໄປ ອະທຸກຂະມະສຸຂະເວທະນາທີ່ເກີດຂຶ້ນຍ້ອນອາໄສຜັດສະ ອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸຂະເວທະນາ ທີ່ກຳລັງສະເຫວີຍຢູ່ ອັນເກີດຈາກຜັດສະນັ້ນ ກໍດັບໄປ ຄືສະງົບໄປ

ຄຳວ່າ ຄວາມດີໃຈ ແລະຄວາມເສຍໃຈມີຕົ້ນເຫດມາຈາກຜັດສະ ອະທິບາຍວ່າ ຄວາມດີໃຈ ແລະຄວາມເສຍໃຈ ມີຕົ້ນເຫດມາຈາກຜັດສະ ຄື ມີຜັດສະເປັນເຫດເກີດ ມີຜັດສະເປັນກຳເນີດ ມີຜັດສະເປັນແດນເກີດ ລວມຄວາມວ່າ ຄວາມດີໃຈ ແລະຄວາມເສຍໃຈມີຕົ້ນເຫດມາຈາກຜັດສະ

ຄຳວ່າ ເມື່ອຜັດສະບໍ່ມີ ຄວາມດີໃຈ ແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ ອະທິບາຍວ່າ ເມື່ອຜັດສະບໍ່ມີ ຄື ບໍ່ຜາກົດ ຫາບໍ່ໄດ້ ຄວາມດີໃຈແລະຄວາມເສຍໃຈ ຍ່ອມບໍ່ມີ ຄື ບໍ່ມີຢູ່ ບໍ່ເກີດບໍ່ເກີດຂຶ້ນ ບໍ່ບັງເກີດ ບໍ່ບັງເກີດຂຶ້ນ ບໍ່ຜາກົດ ລວມຄວາມວ່າ ເມື່ອຜັດສະບໍ່ມີ ຄວາມດີໃຈ ແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ

ຄຳວ່າ ຯລຯ ເລື້ອງຄວາມບໍ່ມີແລະຄວາມມີ ອະທິບາຍວ່າ ພະວະທິດຖິ (ຄວາມເຫັນວ່າມີ) ກໍດີ ວິພະວະທິດຖິ (ຄວາມເຫັນວ່າບໍ່ມີ) ກໍດີ ມີຕົ້ນເຫດມາຈາກຜັດສະ

ຄຳວ່າ ເລື້ອງ ໄດ້ແກ່ ເລື້ອງສຳຄັນຍິ່ງ ລວມຄວາມວ່າ ເລື້ອງຄວາມບໍ່ມີແລະຄວາມມີ

ຄຳວ່າ ນີ້ ໃນຄຳວ່າ ເຮົາຂໍບອກ ຯລຯ ນີ້ວ່າ ມີຕົ້ນເຫດມາຈາກຜັດສະນີ້ແກ່ທ່ານອະທິບາຍ ວ່າ ຂໍ້ທີ່ທ່ານທູນຖາມ ທູນຂໍ ທູນອັນເຊີນ ທູນໃຫ້ປະກາດ

ຄຳວ່າ ເຮົາຂໍບອກ ໄດ້ແກ່ ເຮົາຂໍບອກ ຄື ຂໍກ່າວ ສະແດງ ບັນຍັດ ກຳນົດ ເປີດເຜີຍຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ເຮົາຂໍບອກ ຯລຯ ນີ້ແກ່ທ່ານ

ຄຳວ່າ ມີຕົ້ນເຫດມາຈາກຜັດສະນີ້ ໄດ້ແກ່ ມີຕົ້ນເຫດມາຈາກຜັດສະນີ້ ຄື ມີຜັດສະ ເປັນເຫດເກີດ ມີຜັດສະເປັນກຳເນີດ ມີຜັດສະເປັນແດນເກີດ ລວມຄວາມວ່າ ເຮົາຂໍບອກ ຯລຯ ນີ້ວ່າມີຕົ້ນເຫດມາຈາກຜັດສະນີ້ແກ່ທ່ານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ຄວາມດີໃຈແລະຄວາມເສຍໃຈມີຕົ້ນເຫດມາຈາກຜັດສະ
ເມື່ອຜັດສະບໍ່ມີ ຄວາມດີໃຈແລະຄວາມເສຍໃຈເຫຼົ່ານີ້ຈຶ່ງບໍ່ມີ
ເຮົາຂໍບອກເລື້ອງຄວາມບໍ່ມີແລະຄວາມມີນີ້ວ່າ
ມີຕົ້ນເຫດມາຈາກຜັດສະນີ້ແກ່ທ່ານ

[໑໐໖] (ພຣະພຸດທະເນຣະມິດທູນຖາມວ່າ)

ຜັດສະໃນໂລກມີຕົ້ນເຫດມາຈາກໃສ
ແລະຄວາມຍຶດຖືມີມາຈາກໃສ
ເມື່ອອັນໃດບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ
ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ

## ວ່າດ້ວຍຕົ້ນເຫດແຫ່ງຜັດສະ

ຄຳວ່າ ຜັດສະໃນໂລກມີຕົ້ນເຫດມາຈາກໃສ ອະທິບາຍວ່າ ພຣະພຸດທະເນຣະມິດທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດເຖິງມູນ ໗ລ໗ ເຫດເກີດແຫ່ງຜັດສະວ່າ ຜັດສະມີຕົ້ນເຫດມາຈາກໃສ ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຈາກໃສ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ຜັດສະໃນໂລກມີຕົ້ນເຫດມາຈາກໃສ

ຄຳວ່າ ແລະຄວາມຍຶດຖືມີມາຈາກໃສ ອະທິບາຍວ່າ ພຣະພຸດທະເນຣະມິດທູນຖາມ ທູນສອບຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດເຖິງມູນ ໗ລ໗ ເຫດເກີດແຫ່ງຄວາມຍຶດຖືວ່າຄວາມຍຶດຖືມີມາຈາກໃສ ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຈາກໃສ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ລວມຄວາມວ່າ ແລະຄວາມຍຶດຖືມີມາຈາກໃສ

ຄຳວ່າ ເມື່ອອັນໃດບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ ອະທິບາຍວ່າ ເມື່ອອັນໃດ ບໍ່ມີ ຄື ບໍ່ຜາກົດ ຫາບໍ່ໄດ້ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ບຸກຄົນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ເມື່ອອັນໃດບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ

ຄຳວ່າ ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ ອະທິບາຍວ່າ ເມື່ອອັນໃດບໍ່ມີ ຄື ບໍ່ເປັນກ້າວລ່ວງ ກ້າວພົ້ນ ລ່ວງພົ້ນແລ້ວ ຜັດສະຈຶ່ງບໍ່ຖືກຕ້ອງ ລວມຄວາມວ່າ ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ຜັດສະໃນໂລກມີຕົ້ນເຫດມາຈາກໃສ
ແລະຄວາມຍຶດຖືມີມາຈາກໃສ
ເມື່ອອັນໃດບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ
ເມື່ອອັນໃດບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ

[໑໐໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຍ້ອນອາໄສນາມແລະຮູບ ຜັດສະຈຶ່ງເກີດ
ຄວາມຍຶດຖືມີຕົ້ນເຫດມາຈາກຄວາມປາຖະໜາ
ເມື່ອຄວາມປາຖະໜາບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ
ເມື່ອຮູບບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ

ຄຳວ່າ ຍ້ອນອາໄສນາມແລະຮູບ ຜັດສະຈຶ່ງເກີດ ອະທິບາຍວ່າ ຈັກຂຸວິນຍານ ເກີດຂຶ້ນຍ້ອນອາໄສຕາແລະຮູບ ປະຊຸມແຫ່ງທຳ ໓ ປະການ ຄື (໑) ຕາ (໒) ຮູບ (໓) ຈັກຂຸວິນຍານ ຜັດສະຈຶ່ງເກີດ ຕາແລະຮູບຢູ່ໃນສ່ວນຮູບ ສຳປະຍຸດຕະທຳ ທັງຫຼາຍເວັ້ນຈັກຂຸສຳຜັດຢູ່ໃນສ່ວນນາມ ຜັດສະເກີດຂຶ້ນຍ້ອນອາໄສນາມແລະຮູບ ດ້ວຍປະການແນວນີ້

ໂສຕະວິນຍານ ເກີດຂຶ້ນຍ້ອນອາໄສຫູແລະສຽງ ປະຊຸມແຫ່ງທຳ ໓ ປະການ ຄື (໑) ຫູ (໒) ສຽງ (໓) ໂສຕະວິນຍານ ຜັດສະຈຶ່ງເກີດ ຫູແລະສຽງຢູ່ໃນສ່ວນຮູບ ສຳປະຍຸດຕະທຳທັງຫຼາຍເວັ້ນໂສຕະສຳຜັດຢູ່ໃນສ່ວນນາມ ຜັດສະເກີດຂຶ້ນຍ້ອນອາໄສນາມ ແລະຮູບ ດ້ວຍປະການແນວນີ້

ຄານະວິນຍານ ເກີດຂຶ້ນຍ້ອນອາໄສດັງແລະກິ່ນ ປະຊຸມແຫ່ງທຳ ໓ ປະການ ຄື (໑) ດັງ (໒) ກິ່ນ (໓) ຄານະວິນຍານ ຜັດສະຈຶ່ງເກີດ ດັງແລະກິ່ນຢູ່ໃນສ່ວນຮູບ ສຳປະຍຸດຕະທຳທັງຫຼາຍເວັ້ນຄານະສຳຜັດຢູ່ໃນສ່ວນນາມ ຜັດສະເກີດຂຶ້ນຍ້ອນອາໄສນາມແລະຮູບ ດ້ວຍປະການແນວນີ້

ຊິວຫາວິນຍານ ເກີດຂຶ້ນຍ້ອນອາໄສລີ້ນແລະຣົດ ປະຊຸມແຫ່ງທຳ ໓ ປະການ ຄື (໑) ລີ້ນ (໒) ຣົດ (໓) ຊິວຫາວິນຍານ ຜັດສະຈຶ່ງເກີດ ລີ້ນແລະຣົດຢູ່ໃນສ່ວນຮູບ ສຳປະຍຸດຕະທຳທັງຫຼາຍເວັ້ນຊິວຫາສຳຜັດຢູ່ໃນສ່ວນນາມ ຜັດສະເກີດຂຶ້ນຍ້ອນອາໄສນາມ ແລະຮູບດ້ວຍປະການແນວນີ້

ກາຍະວິນຍານ ເກີດຂຶ້ນຍ້ອນອາໄສກາຍແລະໂຜດຖັບພະ ປະຊຸມແຫ່ງທຳ ໓ ປະການ ຄື (໑) ກາຍ (໒) ໂຜດຖັບພະ (໓) ກາຍະວິນຍານ ຜັດສະຈຶ່ງເກີດ ກາຍແລະໂຜດຖັບພະ ຢູ່ໃນສ່ວນຮູບ ສຳປະຍຸດຕະທຳທັງຫຼາຍເວັ້ນກາຍສຳຜັດ ຢູ່ໃນສ່ວນນາມ ຜັດສະເກີດຂຶ້ນຍ້ອນອາໄສນາມແລະຮູບ ດ້ວຍປະການແນວນີ້

ມະໂນວິນຍານ ເກີດຂຶ້ນຍ້ອນອາໄສໃຈແລະທຳມາຣົມທັງຫຼາຍ ປະຊຸມແຫ່ງທຳ ໓ ປະການ ຄື (໑) ຫະທະຍະວັດຖຸ (໒) ທຳມາຣົມ (໓) ມະໂນວິນຍານ ຜັດສະຈຶ່ງເກີດ

ຫະທະຍະວັດຖຸແລະທຳມາຣົມທີ່ມີຮູບທັງຫຼາຍຢູ່ໃນສ່ວນຮູບ ສຳປະຍຸດຕະທຳທັງຫຼາຍເວັ້ນມະໂນສຳຜັດຢູ່ໃນສ່ວນນາມ ຜັດສະເກີດຂຶ້ນຍ້ອນອາໄສນາມແລະຮູບ ດ້ວຍປະການແນວນີ້

## ວ່າດ້ວຍຄວາມຍຶດຖືມີຕົ້ນເຫດມາຈາກຄວາມປາຖະໜາ

ຄຳວ່າ ຄວາມຍຶດຖືມີຕົ້ນເຫດມາຈາກຄວາມປາຖະໜາ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມປາຖະໜາ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຄຳວ່າ ຄວາມຍຶດຖື ໄດ້ແກ່ ຄວາມຍຶດຖື ໒ ຢ່າງ ຄື (໑) ຄວາມຍຶດຖືດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດ ຕັນຫາ ຯລຯ ນີ້ຊື່ວ່າຄວາມຍຶດຖືດ້ວຍອຳນາດທິດຖິ

ຄຳວ່າ ຄວາມຍຶດຖືມີຕົ້ນເຫດມາຈາກຄວາມປາຖະໜາ ອະທິບາຍວ່າ ຄວາມຍຶດຖື ມີຕົ້ນເຫດມາຈາກຄວາມປາຖະໜາ ຄື ມີຄວາມປາຖະໜາເປັນຕົ້ນເຫດ ມີຄວາມປາດຖະໜາເປັນປັດໄຈ ມີຄວາມປາຖະໜາເປັນສາເຫດ ມີຄວາມປາຖະໜາເປັນແດນເກີດ ລວມຄວາມວ່າ ຄວາມຍຶດຖືມີຕົ້ນເຫດມາຈາກຄວາມປາຖະໜາ

ຄຳວ່າ ເມື່ອຄວາມປາຖະໜາບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມປາຖະໜາ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າ ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ

ຄຳວ່າ ເມື່ອຄວາມປາຖະໜາບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ ອະທິບາຍວ່າ ເມື່ອຄວາມປາຖະໜາບໍ່ມີ ຄື ບໍ່ຜາກົດ ຫາບໍ່ໄດ້ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ໄດ້ແກ່ ຄວາມປາຖະໜາ ບຸກຄົນນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ເມື່ອຄວາມປາຖະໜາບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ

## ວ່າດ້ວຍມະຫາພູຕະຮູບ ໔

ຄຳວ່າ ຮູບ ໃນຄຳວ່າ ເມື່ອຮູບບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔

ຄຳວ່າ ເມື່ອຮູບບໍ່ມີ ໄດ້ແກ່ ຮູບບໍ່ມີຍ້ອນເຫດ ໔ ຢ່າງ ຄື

໑. ຍ້ອນການຮູ້
໒. ຍ້ອນການພິຈາລະນາ
໓. ຍ້ອນການລະ
໔. ຍ້ອນການກ້າວພົ້ນ

ຮູບບໍ່ມີຍ້ອນການຮູ້ ເປັນແນວໃດ?

ຄື ພິກຂຸຮູ້ຮູບ ຄື ຮູ້ຈັກ ເບິ່ງເຫັນວ່າ ຮູບແນວໃດແນວໜຶ່ງ ຮູບທັງໝົດ ຄື ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔ ຮູບບໍ່ມີຍ້ອນການຮູ້ ເປັນແນວນີ້

ຮູບບໍ່ມີຍ້ອນການພິຈາລະນາ ເປັນແນວໃດ?

ຄື ພິກຂຸເຮັດຮູບທີ່ຮູ້ແລ້ວໃຫ້ຜາກົດແນວນີ້ ພິຈາລະນາຮູບ ຄື ພິຈາລະນາໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນໂຣກ ເປັນຄືຫົວຝີ ເປັນຄືລູກສອນ ເປັນຂອງລຳບາກ ເປັນອາພາດ ເປັນຢ່າງອື່ນ ເປັນຂອງຊຸດໂຊມ ເປັນສະໜຽດ ເປັນອຸປັດທະວະ ເປັນໄພ ເປັນອຸປະສັກ ເປັນຂອງຫວັ່ນໄຫວ ເປັນຂອງຜຸພັງ ເປັນຂອງບໍ່ຍັ່ງຍືນ ເປັນຂອງບໍ່ມີບ່ອນຕ້ານທານ ເປັນຂອງບໍ່ມີບ່ອນຫຼົບລີ້ ເປັນຂອງບໍ່ມີບ່ອນເພິ່ງ ເປັນຂອງວ່າງ ເປັນຂອງເປົ່າ ເປັນຂອງສູນ ເປັນອະນັດຕາ ເປັນຂອງມີໂທດ ເປັນຂອງຜັນປ່ຽນໄປເປັນທຳມະດາ ເປັນຂອງບໍ່ມີແກ່ນສານ ເປັນເຫດແຫ່ງຄວາມລຳບາກ ເປັນຄືເພດຊະຄາດ ເປັນຂອງປາສະຈາກຄວາມຈະເລີນ ເປັນຂອງມີອາສະວະ ເປັນຂອງທີ່ຖືກເຫດປັດໄຈປຸງແຕ່ງ ເປັນເຫຍື່ອແຫ່ງມານ ມີຊາດເປັນທຳມະດາ ມີຊະຣາເປັນທຳມະດາ ມີພະຍາທິເປັນທຳມະດາ ມີມໍຣະນະເປັນທຳມະດາ ມີໂສກະ ປະຣິເທວະ ທຸກຂະໂທມະນັດ ອຸປາຍາສະເປັນທຳມະດາ ມີຄວາມເສົ້າໝອງເປັນທຳມະດາ ເປັນເຫດເກີດທຸກ ຕັ້ງຢູ່ບໍ່ໄດ້ ຫາຄວາມແຊ່ມຊື່ນບໍ່ໄດ້ ເປັນໂທດ ເປັນຂອງທີ່ຕ້ອງສະລັດອອກໄປ ຮູບບໍ່ມີຍ້ອນການພິຈາລະນາ ເປັນແນວນີ້

ຮູບບໍ່ມີຍ້ອນການລະ ເປັນແນວໃດ?

ຄື ພິກຂຸເມື່ອພິຈາລະນາເຫັນແນວນີ້ແລ້ວ ກໍຍ່ອມລະ ຄື ບັນເທົາ ເຮັດໃຫ້ໝົດສິ້ນໄປໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມກຳໜັດຍ້ອນຄວາມພໍໃຈໃນຮູບ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ພວກທ່ານຈົ່ງລະຄວາມ ກຳໜັດ ຍ້ອນຄວາມພໍໃຈໃນຮູບ ທ່ານລະຮູບນັ້ນໄດ້ເດັດຂາດແລ້ວແນວນີ້ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຮູບບໍ່ມີຍ້ອນການລະ ເປັນແນວນີ້

ຮູບບໍ່ມີຍ້ອນການກ້າວພົ້ນ ເປັນແນວໃດ?

ຄື ຜູ້ໄດ້ອະຮູບສະມາບັດ ໔ ຄື ບໍ່ມີຮູບຄື ບໍ່ຜາກົດ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນແລ້ວຮູບບໍ່ມີຍ້ອນການກ້າວພົ້ນ ເປັນແນວນີ້

ຮູບຊື່ວ່າບໍ່ມີຍ້ອນເຫດ ໔ ຢ່າງເຫຼົ່ານີ້

ຄຳວ່າ ເມື່ອຮູບບໍ່ມີ ຜັດສະຈິ່ງບໍ່ຖືກຕ້ອງ ອະທິບາຍວ່າ ເມື່ອຮູບບໍ່ມີ ຄື ບໍ່ເປັນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນ ຜັດສະ ໕ ຢ່າງ ຄື

໑. ຈັກຂຸສໍາຜັດ ໒. ໂສຕະສໍາຜັດ
໓. ຄານະສໍາຜັດ ໔. ຊິວຫາສໍາຜັດ
໕. ກາຍະສໍາຜັດ ຍ່ອມບໍ່ຖືກຕ້ອງ ລວມຄວາມວ່າ ເມື່ອຮູບບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບ ວ່າ

ຍ້ອນອາໄສນາມແລະຮູບ ຜັດສະຈຶ່ງເກີດ
ຄວາມຍຶດຖືມີຕົ້ນເຫດມາຈາກຄວາມປາຖະໜາ
ເມື່ອຄວາມປາຖະໜາບໍ່ມີ ຄວາມຍຶດຖືວ່າເປັນຂອງເຮົາຈຶ່ງບໍ່ມີ
ເມື່ອຮູບບໍ່ມີ ຜັດສະຈຶ່ງບໍ່ຖືກຕ້ອງ

[໑໐໗] (ພຣະພຸດທະເນຣະມິດທູນຖາມວ່າ)

ເມື່ອບຸກຄົນດໍາເນີນແນວໃດ ຮູບຈຶ່ງບໍ່ມີ
ສຸກແລະທຸກຈະບໍ່ມີໄດ້ແນວໃດ
ສຸກແລະທຸກຍ່ອມບໍ່ມີໂດຍວິທີການໃດ
ຂໍພຣະອົງໂຜດຕັດບອກວິທີການນັ້ນແກ່ຂ້າພຣະອົງ
ຂ້າພຣະອົງມີຄວາມຕັ້ງໃຈວ່າ ຈະຮູ້ວິທີການນັ້ນ

ຄໍາວ່າ ດໍາເນີນແນວໃດ ໃນຄໍາວ່າ ເມື່ອບຸກຄົນດໍາເນີນແນວໃດ ຮູບຈຶ່ງບໍ່ມີ ອະທິບາຍວ່າ ດໍາເນີນແນວໃດ ຄື ປະຕິບັດແນວໃດ ເຄື່ອນໄຫວແນວໃດ ເປັນໄປແນວໃດ ລ້ຽງຊີວິດແນວໃດ ດໍາເນີນໄປແນວໃດ ຍັງຊີວິດໃຫ້ດໍາເນີນໄປແນວໃດ ຮູບຈຶ່ງບໍ່ມີ ຄື ບໍ່ເປັນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນ ລວມຄວາມວ່າ ເມື່ອບຸກຄົນດໍາເນີນແນວໃດ ຮູບຈຶ່ງບໍ່ມີ

ຄໍາວ່າ ສຸກແລະທຸກຈະບໍ່ມີໄດ້ແນວໃດ ອະທິບາຍວ່າ ສຸກແລະທຸກຈະບໍ່ມີ ຄື ບໍ່ເປັນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນໄດ້ແນວໃດ ລວມຄວາມວ່າ ສຸກແລະທຸກຈະບໍ່ມີໄດ້ ຢ່າງໃດ

ຄໍາວ່າ ວິທີການນັ້ນ ໃນຄໍາວ່າ ສຸກແລະທຸກຍ່ອມບໍ່ມີໂດຍວິທີການໃດ ຂໍພຣະອົງໂຜດຕັດບອກວິທີການນັ້ນແກ່ຂ້າພຣະອົງ ໄດ້ແກ່ ວິທີການທີ່ຂ້າພຣະອົງທູນຖາມທູນຂໍ ທູນອັນເຊີນທູນໃຫ້ຊົງປະກາດ ລວມຄວາມວ່າ ວິທີການນັ້ນ

ຄໍາວ່າ ຂໍພຣະອົງໂຜດຕັດບອກ ฯລฯ ນັ້ນແກ່ຂ້າພຣະອົງ ໄດ້ແກ່ ຂໍພຣະອົງໂຜດ ຕັດ ຄື ໂຜດບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກ ฯລฯ ນັ້ນແກ່ຂ້າພຣະອົງ

ຄໍາວ່າ ສຸກແລະທຸກຍ່ອມບໍ່ມີໂດຍວິທີການໃດ ໄດ້ແກ່ ສຸກແລະທຸກຍ່ອມບໍ່ມີ ຄື ບໍ່ເປັນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນ ໂດຍວິທີການໃດ ລວມຄວາມວ່າ ສຸກແລະທຸກຍ່ອມ ບໍ່ມີໂດຍວິທີການໃດ ຂໍພຣະອົງໂຜດຕັດບອກວິທີການນັ້ນແກ່ຂ້າພຣະອົງ

ຄຳວ່າ ຈະຮູ້ວິທີການນັ້ນ ໃນຄຳວ່າ ຂ້າພຣະອົງມີຄວາມຕັ້ງໃຈວ່າ ຈະຮູ້ວິທີການນັ້ນ ໄດ້ແກ່ ພວກຂ້າພຣະອົງເພິ່ງຮູ້ ຄື ເພິ່ງຮູ້ທົ່ວເຖິງ ຮູ້ແຈ່ມແຈ້ງ ຮູ້ສະເພາະ ແທງຕະຫຼອດວິທີການນັ້ນ ລວມຄວາມວ່າ ຈະຮູ້ວິທີການນັ້ນ

ຄຳວ່າ ຂ້າພຣະອົງມີຄວາມຕັ້ງໃຈວ່າ ໄດ້ແກ່ ຂ້າພຣະອົງມີຄວາມຕັ້ງໃຈ ຄື ຂ້າພຣະອົງມີຄວາມຄິດ ຂ້າພຣະອົງມີຄວາມດຳຣິ ຂ້າພຣະອົງມີຄວາມຮູ້ແຈ້ງ ດັ່ງນີ້ ລວມຄວາມວ່າ ຂ້າພຣະອົງມີຄວາມຕັ້ງໃຈວ່າ ຈະຮູ້ວິທີການນັ້ນ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດ ຈຶ່ງທູນຖາມວ່າ

ເມື່ອບຸກຄົນດຳເນີນແນວໃດ ຮູບຈຶ່ງບໍ່ມີ
ສຸກແລະທຸກຈະບໍ່ມີໄດ້ແນວໃດ
ສຸກແລະທຸກຍ່ອມບໍ່ມີໂດຍວິທີການໃດ
ຂໍພຣະອົງໂຜດຕັດບອກວິທີການນັ້ນແກ່ຂ້າພຣະອົງ
ຂ້າພຣະອົງມີຄວາມຕັ້ງໃຈວ່າ ຈະຮູ້ວິທີການນັ້ນ

[໑໐໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບຸກຄົນບໍ່ເປັນຜູ້ມີສັນຍາໂດຍສັນຍາປົກກະຕິ
ບໍ່ເປັນຜູ້ມີສັນຍາໂດຍສັນຍາຜິດປົກກະຕິ
ເປັນຜູ້ບໍ່ມີສັນຍາກໍບໍ່ແມ່ນ ປາສະຈາກສັນຍາກໍບໍ່ແມ່ນ
ເມື່ອບຸກຄົນດຳເນີນແນວນີ້ ຮູບຈຶ່ງບໍ່ມີ
ຍ້ອນວ່າສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າມີຕົ້ນເຫດມາຈາກສັນຍາ

ຄຳວ່າ ບຸກຄົນບໍ່ເປັນຜູ້ມີສັນຍາໂດຍສັນຍາປົກກະຕິ ບໍ່ເປັນຜູ້ມີສັນຍາໂດຍສັນຍາ ຜິດປົກກະຕິ ອະທິບາຍວ່າ ຄົນເຫຼົ່າໃດ ດຳຣົງຢູ່ໃນສັນຍາປົກກະຕິ ຄົນເຫຼົ່ານັ້ນ ຕັດຮຽກວ່າ ຜູ້ມີສັນຍາໂດຍສັນຍາປົກກະຕິ ບຸກຄົນນັ້ນບໍ່ໄດ້ດຳຣົງຢູ່ໃນສັນຍາປົກກະຕິ ຄົນເຫຼົ່າໃດ ເປັນບ້າແລະມີຈິດຟຸ້ງຊ່ານ ຄົນເຫຼົ່ານັ້ນ ຕັດຮຽກວ່າ ຜູ້ມີສັນຍາໂດຍ ສັນຍາຜິດປົກກະຕິ ບຸກຄົນນັ້ນ ບໍ່ໄດ້ເປັນບ້າ ບໍ່ໄດ້ມີຈິດຟຸ້ງຊ່ານ ລວມຄວາມວ່າ ບຸກຄົນບໍ່ເປັນຜູ້ມີສັນຍາໂດຍສັນຍາປົກກະຕິ ບໍ່ເປັນຜູ້ມີສັນຍາໂດຍສັນຍາຜິດປົກກະຕິ

ຄຳວ່າ ເປັນຜູ້ບໍ່ມີສັນຍາກໍບໍ່ແມ່ນ ປາສະຈາກສັນຍາກໍບໍ່ແມ່ນ ອະທິບາຍວ່າ ຄົນເຫຼົ່າໃດເຂົ້ານິໂຣດສະມາບັດໄດ້ແລ້ວ ແລະເປັນອະສັນຍີສັດ ຄົນເຫຼົ່ານັ້ນ ຕັດຮຽກວ່າ ຜູ້ບໍ່ມີສັນຍາ ບຸກຄົນນັ້ນບໍ່ແມ່ນຜູ້ເຂົ້ານິໂຣດສະມາບັດໄດ້ແລ້ວ ບໍ່ໄດ້ເປັນອະສັນຍີສັດ ຄົນເຫຼົ່າໃດ ໄດ້ອະຣູບສະມາບັດ ໔ ຄົນເຫຼົ່ານັ້ນ ຕັດຮຽກວ່າ ຜູ້ປາສະຈາກສັນຍາ ບຸກຄົນນັ້ນບໍ່ແມ່ນຜູ້ໄດ້ອະຣູບສະມາບັດ ໔ ລວມຄວາມວ່າ ເປັນຜູ້ບໍ່ມີສັນຍາກໍບໍ່ແມ່ນ ປາສະຈາກສັນຍາກໍບໍ່ແມ່ນ

ຄຳວ່າ ເມື່ອບຸກຄົນດຳເນີນແນວນີ້ ຮູບຈຶ່ງບໍ່ມີ ອະທິບາຍວ່າ ພິກຂຸໃນທຳວິໄນນີ້ ຍ້ອນລະສຸກໄດ້ ໗ລ໗ ບັນລຸຈະຕຸດຖະຊານຢູ່ ທ່ານເມື່ອຈິດຕັ້ງໝັ້ນ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກອຸປະກິເລດ ອ່ອນໂຍນ ຄວນແກ່ການງານ ຕັ້ງໝັ້ນ ເຖິງຄວາມບໍ່ຫວັ່ນໄຫວແນວນີ້ ຍ່ອມເອນ ນ້ອມຈິດໄປເພື່ອໃຫ້ໄດ້ອາກາສານັນຈາຍະຕະນະສະມາບັດເປັນຜູ້ພ້ອມພຽງດ້ວຍທຳເປັນທາງແຫ່ງອະຣູປະສະມາບັດ ເມື່ອບຸກຄົນດຳເນີນແນວນີ້ ຄື ປະຕິບັດແນວນີ້ ເຄື່ອນໄຫວແນວນີ້ ເປັນໄປແນວນີ້ ລ້ຽງຊີວິດແນວນີ້ ດຳເນີນໄປແນວນີ້ ຍັງຊີວິດໃຫ້ດຳເນີນໄປແນວນີ້ ຮູບກໍຍ່ອມບໍ່ມີ ຄື ບໍ່ເປັນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນ ລວມຄວາມວ່າ ເມື່ອບຸກຄົນດຳເນີນແນວນີ້ ຮູບຈຶ່ງບໍ່ມີ

## ວ່າດ້ວຍທຳເປັນເຄື່ອງເນີ່ນຊ້າ

ຄຳວ່າ ຍ້ອນວ່າສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າມີຕົ້ນເຫດມາຈາກສັນຍາ ອະທິບາຍວ່າ ທຳເປັນເຄື່ອງເນີ່ນຊ້ານັ້ນເອງ ຄື ສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າຄື ຕັນຫາ ສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າຄືທິດຖິ ສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າຄື ມານະ ມີຕົ້ນເຫດມາຈາກສັນຍາ ຄື ມີສັນຍາເປັນເຫດເກີດ ມີສັນຍາເປັນກຳເນີດ ມີສັນຍາເປັນແດນເກີດ ລວມຄວາມວ່າ ຍ້ອນວ່າສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າມີຕົ້ນເຫດມາຈາກສັນຍາ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ບຸກຄົນບໍ່ເປັນຜູ້ມີສັນຍາໂດຍສັນຍາປົກກະຕິ
ບໍ່ເປັນຜູ້ມີສັນຍາໂດຍສັນຍາຜິດປົກກະຕິ
ເປັນຜູ້ບໍ່ມີສັນຍາກໍບໍ່ແມ່ນ ປາສະຈາກສັນຍາກໍບໍ່ແມ່ນ
ເມື່ອບຸກຄົນດຳເນີນແນວນີ້ ຮູບຈຶ່ງບໍ່ມີ
ຍ້ອນວ່າສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າມີຕົ້ນເຫດມາຈາກສັນຍາ

[໑໑໐] (ພຣະພຸດທະເນຣະມິດທູນຖາມວ່າ)

ຂ້າພຣະອົງໄດ້ທູນຖາມທຳໃດແລ້ວ
ພຣະອົງກໍໄດ້ຕັດຕອບທຳນັ້ນແກ່ພວກຂ້າພຣະອົງແລ້ວ
ຂ້າພຣະອົງຂໍທູນຖາມທຳອື່ນອີກ
ຂໍເຊີນພຣະອົງໂຜດຕັດບອກທຳນັ້ນດ້ວຍເທີ້ນ
ສະມະນະພາມບາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້
ພາກັນກ່າວຄວາມບໍລິສຸດຂອງຍັກດ້ວຍອະຣູບສະມາບັດ
ເທົ່ານັ້ນບໍວ່າ ເປັນທຳອັນເລີດ
ຫຼືວ່າ ສະມະນະພາມບາງພວກກ່າວເຖິງຄວາມບໍລິສຸດ
ແນວອື່ນວ່າເລີດກວ່າອະຣູບສະມາບັດນີ້

ຄຳວ່າ ຂ້າພຣະອົງໄດ້ທູນຖາມທຳໃດແລ້ວ ພຣະອົງກໍໄດ້ຕັດຕອບທຳນັ້ນແກ່ພວກຂ້າ ພຣະອົງແລ້ວ ໄດ້ແກ່ ຂ້າພຣະອົງໄດ້ທູນຖາມ ຄື ໄດ້ທູນຂໍ ໄດ້ທູນອັນເຊີນ ໄດ້ທູນໃຫ້ ປະກາດທຳໃດແລ້ວ

ຄຳວ່າ ພຣະອົງກໍໄດ້ຕັດຕອບທຳນັ້ນແກ່ພວກຂ້າພຣະອົງແລ້ວ ໄດ້ແກ່ ໄດ້ຕັດຕອບ ຄື ໄດ້ຊົງຊີ້ແຈ່ງແລ້ວ ຕັດບອກແລ້ວ ຊົງສະແດງແລ້ວ ບັນຍັດແລ້ວ ກຳນົດແລ້ວ ເປີດເຜີຍແລ້ວ ຈຳແນກແລ້ວ ເຮັດໃຫ້ງ່າຍແລ້ວ ປະກາດແລ້ວ ລວມຄວາມວ່າ ຂ້າພຣະອົງໄດ້ທູນຖາມທຳໃດແລ້ວ ພຣະອົງກໍໄດ້ຕັດຕອບທຳນັ້ນແກ່ພວກຂ້າພຣະອົງແລ້ວ

ຄຳວ່າ ຂ້າພຣະອົງຂໍທູນຖາມທຳອື່ນອີກ ຂໍເຊີນພຣະອົງໂຜດຕັດບອກທຳນັ້ນດ້ວຍເທີ້ນ ໄດ້ແກ່ ຂ້າພຣະອົງຂໍທູນຖາມ ຄື ທູນຂໍ ທູນອັນເຊີນ ທູນໃຫ້ປະກາດທຳອື່ນອີກ ໄດ້ແກ່ ຂໍທູນຖາມພຣະອົງເຖິງທຳທີ່ຍິ່ງຂຶ້ນໄປ

ຄຳວ່າ ຂໍເຊີນພຣະອົງໂຜດຕັດບອກທຳນັ້ນດ້ວຍເທີ້ນ ໄດ້ແກ່ ຂໍເຊີນ ພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂ້າພຣະອົງຂໍທູນຖາມທຳອື່ນອີກ ຂໍເຊີນພຣະອົງໂຜດຕັດບອກທຳນັ້ນ ດ້ວຍເທີ້ນ

## ວ່າດ້ວຍຄວາມບໍລິສຸດແຫ່ງອະຣູບສະມາບັດ

ຄຳວ່າ ສະມະນະພາມບາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້ ພາກັນກ່າວ ຄວາມບໍລິສຸດຂອງຍັກດ້ວຍອະຣູບສະມາບັດເທົ່ານັ້ນບໍວ່າ ເປັນທຳອັນເລີດ ອະທິບາຍວ່າ ສະມະນະພາມບາງພວກ ຍ່ອມກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ອະຣູບສະມາບັດເຫຼົ່ານີ້ວ່າ ເປັນທຳອັນເລີດ ຄື ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ

ຄຳວ່າ ຂອງຍັກ ໄດ້ແກ່ ຂອງສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດສັດເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ຄວາມບໍລິສຸດ ໄດ້ແກ່ ຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ

ຄຳວ່າ ອ້າງຕົນວ່າ ເປັນບັນດິດໃນໂລກນີ້ ໄດ້ແກ່ ກ່າວອ້າງຕົນວ່າ ເປັນບັນດິດໃນໂລກນີ້ ຄື ອ້າງວ່າເປັນນັກປາດ ອ້າງວ່າມີຍານ ອ້າງວ່າມີເຫດຜົນ ອ້າງວ່າມີຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າ ສະມະນະ ພາມບາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້ ພາກັນກ່າວຄວາມບໍລິສຸດຂອງຍັກດ້ວຍ ອະຣູບສະມາບັດເທົ່ານັ້ນວ່າ ເປັນທຳອັນເລີດ

ຄຳວ່າ ຫຼືວ່າ ສະມະນະພາມບາງພວກກ່າວເຖິງຄວາມບໍລິສຸດແນວອື່ນວ່າເລີດກວ່າອະຣູບສະມາບັດນີ້ ອະທິບາຍວ່າ ຫຼື ວ່າ ສະມະນະພາມບາງພວກ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນອະຣູບສະມາບັດເຫຼົ່ານີ້ ຍ່ອມກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ຄວາມບໍລິສຸດ ຄວາມສະ

ອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຂອງຍັກແນວອື່ນ ຄື ປະເສີດກວ່າອະຣູບສະມາບັດນີ້ ລວມຄວາມວ່າ ຫຼືວ່າ ສະມະນະພາມບາງພວກກ່າວເຖິງຄວາມມົດຈົດແນວອື່ນວ່າເລີດກວ່າອະຣູບສະມາບັດນີ້ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ຂ້າພຣະອົງໄດ້ທູນຖາມທໍາໃດແລ້ວ
ພຣະອົງກໍໄດ້ຕັດຕອບທໍານັ້ນແກ່ພວກຂ້າພຣະອົງແລ້ວ
ຂ້າພຣະອົງຂໍທູນຖາມທໍາອື່ນອີກ
ຂໍເຊີນພຣະອົງໂຜດຕັດບອກທໍານັ້ນດ້ວຍເທີ້ນ
ສະມະນະພາມບາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້
ພາກັນກ່າວຄວາມມົດຈົດຂອງຍັກດ້ວຍອະຣູບສະມາບັດ
ເທົ່ານັ້ນບໍວ່າ ເປັນທໍາອັນເລີດ
ຫຼືວ່າ ສະມະນະພາມບາງພວກກ່າວເຖິງຄວາມມົດຈົດ
ແນວອື່ນວ່າເລີດກວ່າອະຣູບສະມາບັດນີ້

[໑໑໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ສະມະນະພາມບາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້
ພາກັນກ່າວຄວາມມົດຈົດຂອງຍັກດ້ວຍອະຣູບສະມາບັດ
ເທົ່ານັ້ນວ່າ ເປັນທໍາອັນເລີດ ບັນດາສະມະນະພາມເຫຼົ່ານັ້ນ
ສະມະນະພາມອີກພວກໜຶ່ງກໍອ້າງຕົນວ່າເປັນຜູ້ສະຫຼາດ
ພາກັນກ່າວຄວາມສະງົບໃນຄວາມບໍ່ມີອັນໃດເຫຼືອ

ຄໍາວ່າ ສະມະນະພາມບາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້ ພາກັນກ່າວ ຄວາມມົດຈົດຂອງຍັກດ້ວຍອະຣູບສະມາບັດເທົ່ານັ້ນວ່າ ເປັນທໍາອັນເລີດ ອະທິບາຍວ່າ ມີສະມະນະພາມບາງພວກ ຜູ້ມີວາທະວ່າທ່ຽງ ພາກັນກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງອະຣູບສະມາບັດເຫຼົ່ານີ້ວ່າ ເປັນທໍາອັນເລີດ ຄື ປະເສີດ ວິເສດ ນໍາໜ້າ ສູງສຸດ ປະເສີດສຸດ

ຄໍາວ່າ ຍັກ ໄດ້ແກ່ ສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກໍາ ມະນຸດ

ຄໍາວ່າ ຄວາມມົດຈົດ ໄດ້ແກ່ ຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ

ຄໍາວ່າ ອ້າງຕົນວ່າເປັນບັນດິດໃນໂລກນີ້ ໄດ້ແກ່ ກ່າວອ້າງຕົນວ່າເປັນບັນດິດ ໃນໂລກນີ້ ຄື ອ້າງວ່າເປັນນັກປາດ ອ້າງວ່າມີຍານ ອ້າງວ່າມີເຫດຜົນ ອ້າງວ່າມີ ຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າ ສະມະນະ ພາມບາງພວກ

ອ້າງຕົນວ່າເປັນບັນດິດໃນໂລກນີ້ ພາກັນກ່າວຄວາມມິດຈິດຂອງຍັກດ້ວຍອະຣູບສະມາບັດເທົ່ານັ້ນວ່າ ເປັນທຳອັນເລີດ

ຄຳວ່າ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມອີກພວກໜຶ່ງກໍອ້າງຕົນວ່າເປັນຜູ້ສະຫຼາດ ພາກັນກ່າວຄວາມສະງົບໃນຄວາມບໍ່ມີອັນໃດເຫຼືອ ອະທິບາຍວ່າ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມອີກພວກໜຶ່ງຜູ້ມີວາທະວ່າຂາດສູນ ເບື່ອຕໍ່ພົບ ມັກຄວາມປາສະຈາກພົບ ສະມະນະພາມພວກນັ້ນກ່າວຄວາມສະງົບ ຄື ຄວາມເຂົ້າໄປສະງົບ ຄວາມສະງົບເຢັນ ຄວາມດັບ ຄວາມສະຫງັດແຫ່ງສັດວ່າ ທ່ານຜູ້ຈະເລີນ ຫຼັງຈາກຕາຍແລ້ວ ອັດຕານີ້ ຍ່ອມຂາດສູນ ພິນາດ ບໍ່ມີຢູ່ ໂດຍເຫດໃດ ຄວາມບໍ່ມີອັນໃດເຫຼືອ ກໍມີໂດຍເຫດເທົ່ານັ້ນ

ຄຳວ່າ ອ້າງຕົນວ່າເປັນຜູ້ສະຫຼາດ ໄດ້ແກ່ ກ່າວອ້າງຕົນວ່າເປັນຜູ້ສະຫຼາດ ຄື ອ້າງວ່າເປັນບັນດິດ ອ້າງວ່າເປັນນັກປາດ ອ້າງວ່າມີຍານ ອ້າງວ່າມີເຫດຜົນ ອ້າງວ່າມີຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມອີກພວກໜຶ່ງກໍອ້າງຕົນວ່າເປັນຜູ້ສະຫຼາດ ພາກັນກ່າວຄວາມສະງົບໃນຄວາມບໍ່ມີອັນໃດເຫຼືອ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ສະມະນະພາມບາງພວກອ້າງຕົນວ່າ ເປັນບັນດິດໃນໂລກນີ້
ພາກັນກ່າວຄວາມມິດຈິດຂອງຍັກດ້ວຍອະຣູບສະມາບັດ
ເທົ່ານັ້ນວ່າ ເປັນທຳອັນເລີດ ບັນດາສະມະນະພາມເຫຼົ່ານັ້ນ
ສະມະນະພາມອີກພວກໜຶ່ງກໍອ້າງຕົນວ່າເປັນຜູ້ສະຫຼາດ
ພາກັນກ່າວຄວາມສະງົບໃນຄວາມບໍ່ມີອັນໃດເຫຼືອ

[໑໑໔] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ມຸນີຜູ້ມີປັນຍາເຄື່ອງພິຈາລະນານັ້ນ ຮູ້ຈັກສະມະນະພາມ
ຜູ້ເປັນເຈົ້າລັດທິເຫຼົ່ານີ້ວ່າ ເປັນຜູ້ເຂົ້າໄປອາໄສທິດຖິ
ແລະຮູ້ຈັກທິດຖິເປັນບ່ອນອາໄສ ນັກປາດເມື່ອຮູ້ຈັກແລ້ວກໍຫຼຸດພົ້ນ
ບໍ່ເຖິງການວິວາດ ບໍ່ກັບມາໃນພົບນ້ອຍພົບໃຫຍ່

## ວ່າດ້ວຍປັນຍາເຄື່ອງພິຈາລະນາ

ຄຳວ່າ ເຫຼົ່ານີ້ ໃນຄຳວ່າ ຮູ້ຈັກສະມະນະພາມຜູ້ເປັນເຈົ້າລັດທິເຫຼົ່ານີ້ວ່າ ເປັນຜູ້ເຂົ້າໄປອາໄສທິດຖິ ໄດ້ແກ່ ຜູ້ເປັນເຈົ້າລັດທິ

ຄຳວ່າ ເຂົ້າໄປອາໄສທິດຖິ ໄດ້ແກ່ ຮູ້ຈັກ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ເປັນຜູ້ອາໄສສັດສະຕະທິດຖິ (ຄວາມເຫັນວ່າທ່ຽງ) ເປັນຜູ້ອາໄສອຸດເສທະທິດຖິ (ຄວາມເຫັນວ່າຂາດສູນ) ເປັນຜູ້ອາໄສທັງສັດສະຕະທິດຖິ ແລະອຸດເສທະທິດຖິ ລວມຄວາມວ່າ ຮູ້ຈັກສະມະນະພາມຜູ້ເປັນເຈົ້າລັດທິເຫຼົ່ານີ້ວ່າ ເປັນຜູ້ເຂົ້າໄປອາໄສທິດຖິ

ຄຳວ່າ ມຸນີ ໃນຄຳວ່າ ມຸນີຜູ້ມີປັນຍາເຄື່ອງພິຈາລະນານັ້ນ ຯລຯ ແລະຮູ້ຈັກທິດຖິເປັນທີ່ອາໄສ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າ ມຸນີ

ມຸນີ ຮູ້ຈັກ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ເປັນຜູ້ອາໄສສັດສະຕະທິດຖິ ເປັນຜູ້ອາໄສອຸດເສທະທິດຖິ ເປັນຜູ້ອາໄສທັງສັດສະຕະທິດຖິແລະອຸດເສທະທິດຖິ

ຄຳວ່າ ຯລຯ ຜູ້ມີປັນຍາເຄື່ອງພິຈາລະນານັ້ນ ໄດ້ແກ່ ຜູ້ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ມຸນີຜູ້ມີປັນຍາເຄື່ອງພິຈາລະນານັ້ນ ຯລຯ ແລະຮູ້ຈັກທິດຖິເປັນບ່ອນອາໄສ

ຄຳວ່າ ເມື່ອຮູ້ຈັກແລ້ວກໍຫຼຸດພົ້ນບໍ່ເຖິງການວິວາດ ໄດ້ແກ່ ເມື່ອຮູ້ຈັກແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ

ຄຳວ່າ ຫຼຸດພົ້ນ ໄດ້ແກ່ ຫຼຸດໄປແລ້ວ ພົ້ນໄປແລ້ວ ຫຼຸດພົ້ນໄປແລ້ວ ຫຼຸດພົ້ນໄປດ້ວຍດີແລ້ວ ໂດຍຄວາມຫຼຸດພົ້ນຍ້ອນບໍ່ຖືໝັ້ນໂດຍສ່ວນດຽວ ຄື ເມື່ອຮູ້ຈັກແລ້ວ ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ສັງຂານ ທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຄື

ເມື່ອຮູ້ຈັກແລ້ວ ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ກໍຫຼຸດໄປແລ້ວ ພົ້ນໄປແລ້ວ ຫຼຸດພົ້ນໄປແລ້ວ ຫຼຸດພົ້ນໄປດ້ວຍດີແລ້ວ ໂດຍຄວາມຫຼຸດພົ້ນຍ້ອນບໍ່ຖືໝັ້ນໂດຍສ່ວນດຽວ ລວມຄວາມວ່າ ເມື່ອຮູ້ຈັກແລ້ວກໍຫຼຸດພົ້ນ

ຄຳວ່າ ບໍ່ເຖິງການວິວາດ ໄດ້ແກ່ ບໍ່ກໍ່ການຜິດຖຽງ ບໍ່ກໍ່ການໝາງໃຈ ບໍ່ກໍ່ການຍາດແຍ່ງ ບໍ່ກໍ່ການວິວາດ ບໍ່ກໍ່ການມຸ້ງຮ້າຍ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ອັກຄິເວສະນະ ພິກຂຸຜູ້ມີຈິດຫຼຸດພົ້ນແລ້ວແນວນີ້ແລ ຍ່ອມບໍ່ໂຕ້ຖຽງກັບຜູ້ໃດ ບໍ່ວິວາດກັບໃຜ ເລື້ອງໃດທີ່ເວົ້າກັນໃນໂລກ ທ່ານກໍບໍ່ ຢຶດໝັ້ນຊີ້ແຈ່ງດ້ວຍເລື້ອງນັ້ນ ໆ ຕາມເຫດ ລວມຄວາມວ່າ ເມື່ອຮູ້ຈັກແລ້ວກໍຫຼຸດພົ້ນ ບໍ່ເຖິງການວິວາດກັບຜູ້ໃດ

ຄຳວ່າ ໃນພົບນ້ອຍພົບໃຫຍ່ ໃນຄຳວ່າ ນັກປາດ ຯລຯ ບໍ່ກັບມາໃນພົບນ້ອຍພົບໃຫຍ່ ອະທິບາຍວ່າ ບໍ່ກັບມາ ຄື ບໍ່ມາເຖິງ ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນ ໃນພົບນ້ອຍພົບໃຫຍ່ ຄື ໃນກຳມະວັດ ແລະວິປາກະວັດ ໃນກຳມະວັດເປັນເຄື່ອງເກີດໃນກາມະພົບ ໃນວິປາກະວັດເປັນເຄື່ອງເກີດໃນກາມະພົບ ໃນກຳມະວັດເປັນເຄື່ອງເກີດໃນຣູບພົບ ໃນວິປາກະວັດເປັນເຄື່ອງ ເກີດໃນຣູບພົບ ໃນກຳມະວັດເປັນເຄື່ອງເກີດໃນອະຣູບພົບ ໃນວິປາກະວັດເປັນເຄື່ອງເກີດໃນອະຣູບພົບ ໃນພົບຕໍ່ໄປ ໃນຄະຕິຕໍ່ໄປ ໃນການຖືກຳເນີດຕໍ່ໄປ ໃນປະຕິສົນທິຕໍ່ໄປ ໃນອັດຕະພາບຕໍ່ໄປ ໃນການບັງເກີດຂອງອັດຕະພາບຕໍ່ໄປ

ຄຳວ່າ ນັກປາດ ໄດ້ແກ່ ນັກປາດ ຄື ບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ນັກປາດ ຯລຯ ບໍ່ກັບມາໃນພົບນ້ອຍພົບໃຫຍ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີຜູ້ມີປັນຍາເຄື່ອງພິຈາລະນານັ້ນ ຮູ້ຈັກສະມະນະພາມ
ຜູ້ເປັນເຈົ້າລັດທິເຫຼົ່ານີ້ວ່າ ເປັນຜູ້ເຂົ້າໄປອາໄສທິດຖິ
ແລະຮູ້ຈັກທິດຖິເປັນບ່ອນອາໄສ ນັກປາດເມື່ອຮູ້ຈັກແລ້ວກໍຫຼຸດພົ້ນ
ບໍ່ເຖິງການວິວາດ ບໍ່ກັບມາໃນພົບນ້ອຍພົບໃຫຍ່

**ກະລະຫະວິວາທະສຸດຕະນິດເທດທີ ໑໑ ຈົບ**

# ໑໘. ຈູລະວິຍູຫະສຸດຕະນິດເທດ

## ອະທິບາຍຈູລະວິຍູຫະສູດ

### ວ່າດ້ວຍການວິວາດກັນຍ້ອນທິດຖິສູດນ້ອຍ

ພຣະສາຣີບຸດເຖຣະຈະກ່າວອະທິບາຍຈູລະວິຍູຫະສູດ ດັ່ງຕໍ່ໄປນີ້

[໑໑໙] (ພຣະພຸດທະເນຣະມິດທູນຖາມວ່າ)

ສະມະນະພາມເຈົ້າລັດທິບາງພວກ
ຍຶດຖືຢູ່ສະເພາະທິດຖິຂອງຕົນ ໆ
ຖືແລ້ວກໍອ້າງຕົວວ່າເປັນຄົນສະຫຼາດ ເວົ້າກັນໄປຕ່າງ ໆ ວ່າ
ບຸກຄົນໃດຮູ້ແນວນີ້ ບຸກຄົນນັ້ນຊື່ວ່າຮູ້ທຳແລ້ວ
ບຸກຄົນໃດຄັດຄ້ານທຳນີ້ ບຸກຄົນນັ້ນຊື່ວ່າຍັງບໍ່ສຳເລັດກິດ

ຄຳວ່າ ຍຶດຖືຢູ່ສະເພາະທິດຖິຂອງຕົນ ໆ ອະທິບາຍວ່າ ສະມະນະພາມເຈົ້າລັດທິ ບາງພວກ ສະມະນະພາມເຫຼົ່ານັ້ນ ຍຶດ ຍຶດຖື ຖື ຍຶດໝັ້ນ ຖືໝັ້ນ ທິດຖິແນວໃດແນວໜຶ່ງ ບັນດາທິດຖິ ໖໒ ແລ້ວ ຢູ່ ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງໃນທິດຖິຂອງຕົນ ໆ ເໝືອນພວກຄະລື ຫັດຜູ້ຄອງເຮືອນກໍຢູ່ໃນເຮືອນ ໝູ່ພິກຂຸຜູ້ມີອາບັດກໍຢູ່ໃນອາບັດ ຫຼື ພວກປຸຖຸຊົນຜູ້ມີກິເລດກໍຢູ່ໃນກິເລດສັນໃດ ມີສະມະນະພາມເຈົ້າລັດທິບາງພວກ ສະມະນະພາມເຫຼົ່ານັ້ນ ຍຶດ ຍຶດຖື ຖື ຍຶດໝັ້ນ ຖືໝັ້ນທິດຖິແນວໃດແນວໜຶ່ງບັນດາທິດຖິ ໖໒ ແລ້ວ ຢູ່ ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງໃນທິດຖິຂອງຕົນ ໆ ສັນນັ້ນຄືກັນ ລວມຄວາມວ່າ ຍຶດຖືຢູ່ສະເພາະທິດຖິຂອງຕົນ ໆ

ຄຳວ່າ ຖືແລ້ວ ໃນຄຳວ່າ ຖືແລ້ວກໍອ້າງຕົວວ່າເປັນຄົນສະຫຼາດ ເວົ້າກັນໄປຕ່າງ ໆ ໄດ້ແກ່ ຍຶດ ຍຶດຖື ຖື ຍຶດໝັ້ນ ຖືໝັ້ນ

ຄຳວ່າ ເວົ້າກັນໄປຕ່າງ ໆ ໄດ້ແກ່ ເວົ້າກັນໄປຕ່າງ ໆ ຄື ເວົ້າຫຼາຍແນວ ເວົ້າແນວນັ້ນແນວນີ້ ເວົ້າໄປຫຼາຍ ຄື ບໍ່ກ່າວ ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ້ງເປັນແນວດຽວກັນ

ຄຳວ່າ ອ້າງຕົວວ່າເປັນຄົນສະຫຼາດ ໄດ້ແກ່ ອ້າງຕົວວ່າເປັນຄົນສະຫຼາດ ຄື ອ້າງວ່າເປັນບັນດິດ ອ້າງວ່າເປັນນັກປາດ ອ້າງວ່າມີຄວາມຮູ້ ອ້າງວ່າມີເຫດຜົນ ອ້າງວ່າມີຄຸນລັກສະນະອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າຖືແລ້ວກໍອ້າງຕົວວ່າເປັນຄົນສະຫຼາດ ເວົ້າກັນໄປຕ່າງ ໆ

ຄຳວ່າ ບຸກຄົນໃດຮູ້ແນວນີ້ ບຸກຄົນນັ້ນກໍຊື່ວ່າ ຮູ້ທຳແລ້ວ ອະທິບາຍວ່າ ບຸກຄົນໃດຮູ້ທຳ ຄື ທິດຖິ ປະຕິປະທາ ມັກ ນີ້ ບຸກຄົນນັ້ນຊື່ວ່າຮູ້ ຄື ໄດ້ຮູ້ ໄດ້ເຫັນ ໄດ້ແທງຕະຫຼອດທຳແລ້ວ ລວມຄວາມວ່າ ບຸກຄົນໃດຮູ້ແນວນີ້ ບຸກຄົນນັ້ນຊື່ວ່າຮູ້ທຳແລ້ວ

ຄຳວ່າ ບຸກຄົນໃດຄັດຄ້ານທຳນີ້ ບຸກຄົນນັ້ນຊື່ວ່າຍັງບໍ່ສຳເລັດກິດ ອະທິບາຍວ່າ ບຸກຄົນໃດ ຄັດຄ້ານທຳ ຄື ທິດຖິ ປະຕິປະທາ ມັກ ນີ້ ບຸກຄົນນັ້ນ ຊື່ວ່າຍັງບໍ່ສຳເລັດກິດ ຄື ບໍ່ສົມບູນ ບໍ່ບໍລິບູນ ໄດ້ແກ່ ບຸກຄົນນັ້ນເປັນຄົນຊົ່ວ ຊາມ ຕໍ່າຊາມ ໜ້າຣັງກຽດ ຫຍາບຊ້າ ຕໍ່າຕ້ອຍ ລວມຄວາມວ່າ ບຸກຄົນໃດຄັດຄ້ານທຳນີ້ ບຸກຄົນນັ້ນຊື່ວ່າຍັງບໍ່ ສຳເລັດກິດ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ສະມະນະພາມເຈົ້າລັດທິບາງພວກ
ຢຶດຖືຢູ່ສະເພາະທິດຖິຂອງຕົນ ໆ
ຖືແລ້ວກໍອ້າງຕົວວ່າເປັນຄົນສະຫຼາດ ເວົ້າກັນໄປຕ່າງ ໆ ວ່າ
ບຸກຄົນໃດຮູ້ແນວນີ້ ບຸກຄົນນັ້ນຊື່ວ່າຮູ້ທຳແລ້ວ
ບຸກຄົນໃດຄັດຄ້ານທຳນີ້ ບຸກຄົນນັ້ນຊື່ວ່າຍັງບໍ່ສຳເລັດກິດ

[໑໑໔] (ພຣະພຸດທະເນຣະມິດທູນຖາມອີກວ່າ)

ສະມະນະພາມເຫຼົ່ານັ້ນ ຖືແນວນີ້ແລ້ວກໍພາກັນວິວາດ
ແລະກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ
ວາທະຂອງສະມະນະພາມເຫຼົ່ານີ້
ວາທະໃດເປັນເລື້ອງຈິງກັນນໍ
ຍ້ອນສະມະນະພາມເຫຼົ່ານີ້ທັງໝົດ
ຕ່າງກໍອ້າງຕົວວ່າເປັນຄົນສະຫຼາດ
ວ່າດ້ວຍວິວາດກັນຍ້ອນຖືທິດຖິ

ຄຳວ່າ ຖືແນວນີ້ແລ້ວກໍພາກັນວິວາດ ອະທິບາຍວ່າ ຢຶດ ຢຶດຖື ຖື ຢຶດໝັ້ນ ຖືໝັ້ນ ຢ່າງນີ້ແລ້ວກໍພາກັນວິວາດ ຄື ກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການຍາດແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍວ່າ ທ່ານບໍ່ຮູ້ທຳວິໄນນີ້ ຯລຯ ຫຼື ຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ ລວມຄວາມວ່າ ຖືແນວນີ້ແລ້ວກໍພາກັນວິວາດ

ຄຳວ່າ ແລະກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ ອະທິບາຍວ່າ ກ່າວແນວນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງແນວນີ້ວ່າ ຄົນອື່ນ ເປັນຄົນພານ ຄື ເປັນຄົນຊົ່ວ ຊາມ ຕໍ່າຊາມ

ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ບໍ່ສະຫຼາດ ຄື ບໍ່ມີຄວາມຮູ້ ໄປຕາມອະວິດຊາ ບໍ່ມີຍານ ບໍ່ມີປັນຍາແຈ່ມແຈ້ງ ມີປັນຍາທຶບ ລວມຄວາມວ່າ ແລະກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ

ຄຳວ່າ ວາທະຂອງສະມະນະພານເຫຼົ່ານີ້ ວາທະໃດເປັນເລື້ອງຈິງກັນນໍ ອະທິບາຍວ່າ ວາທະຂອງສະມະນະພານເຫຼົ່ານີ້ ວາທະໃດເປັນເລື້ອງຈິງ ຄື ແທ້ ແນ່ ເປັນຈິງ ແນ່ນອນ ບໍ່ ວິປະຣິດ ລວມຄວາມວ່າ ວາທະຂອງສະມະນະພານເຫຼົ່ານີ້ ວາທະໃດເປັນເລື້ອງຈິງກັນນໍ

ຄຳວ່າ ຍ້ອນສະມະນະພານເຫຼົ່ານີ້ທັງໝົດຕ່າງກໍອ້າງຕົວວ່າເປັນຄົນສະຫຼາດ ອະທິບາຍວ່າ ສະມະນະພານເຫຼົ່ານີ້ທັງໝົດຕ່າງກໍອ້າງຕົວວ່າເປັນຄົນສະຫຼາດ ຄື ອ້າງວ່າເປັນບັນດິດ ອ້າງວ່າເປັນນັກປາດ ອ້າງວ່າມີຄວາມຮູ້ ອ້າງວ່າມີເຫດຜົນ ອ້າງວ່າມີຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າ ຍ້ອນສະມະນະພານເຫຼົ່ານີ້ທັງໝົດ ຕ່າງກໍອ້າງຕົວວ່າເປັນຄົນສະຫຼາດ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ສະມະນະພານເຫຼົ່ານັ້ນ ຖືແນວນີ້ແລ້ວກໍພາກັນວິວາດ
ແລະກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ
ວາທະຂອງສະມະນະພານເຫຼົ່ານີ້
ວາທະໃດເປັນເລື້ອງຈິງກັນນໍ
ຍ້ອນສະມະນະພານເຫຼົ່ານີ້ທັງໝົດ
ຕ່າງກໍອ້າງຕົວວ່າເປັນຄົນສະຫຼາດ

[໑໑໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຄົນພານບໍ່ຍອມຮັບທຳຂອງຜູ້ອື່ນເລີຍ
ເປັນຄົນຕ່ຳຊາມ ມີປັນຍາຊາມ
ສະມະນະພານທັງໝົດນັ້ນແລເປັນຄົນພານ ມີປັນຍາຊາມ
ສະມະນະພານເຫຼົ່ານີ້ທັງໝົດນັ້ນແລ ຍຶດຖືທິດຖິຢູ່

ຄຳວ່າ ບໍ່ຍອມຮັບທຳຂອງຜູ້ອື່ນເລີຍ ອະທິບາຍວ່າ ບໍ່ຍອມຮັບ ຄື ບໍ່ເຫັນນຳ ບໍ່ໄປນຳ ບໍ່ຍິນດີຕາມທຳ ຄື ທິດຖິ ປະຕິປະທາ ມັກ ຂອງຜູ້ອື່ນ ລວມຄວາມວ່າ ບໍ່ຍອມຮັບທຳຂອງຜູ້ອື່ນເລີຍ

ຄຳວ່າ ຄົນພານ ຯລຯ ເປັນຄົນຕ່ຳຊາມ ມີປັນຍາຊາມ ອະທິບາຍວ່າ ຄົນອື່ນເປັນພານເປັນຄົນຊົ່ວ ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ມີປັນຍາຊົ່ວ ມີປັນຍາຊາມ ມີປັນຍາຕ່ຳຊາມ ມີປັນຍາໜ້າຮັງກຽດ ມີປັນຍາຫຍາບຊ້າ ມີປັນຍາຕ່ຳຕ້ອຍ ລວມຄວາມວ່າ ຄົນພານ ຯລຯ ເປັນຄົນຕ່ຳຊາມ ມີປັນຍາຊາມ

ຄຳວ່າ ສະມະນະພາມທັງໝົດນັ້ນແລ ເປັນຄົນພານ ມີປັນຍາຊາມ ອະທິບາຍວ່າ ສະມະນະພາມເຫຼົ່ານີ້ທັງໝົດນັ້ນແລ ເປັນຄົນພານ ຄື ເປັນຄົນຊົ່ວ ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ສະມະນະພາມທັງໝົດນັ້ນແລ ມີປັນຍາ ຊົ່ວ ຄື ມີປັນຍາຊາມ ມີປັນຍາຕ່ຳຊາມ ມີປັນຍາໜ້າຣັງກຽດ ມີປັນຍາຫຍາບຊ້າ ມີປັນຍາຕ່ຳຕ້ອຍ ລວມຄວາມວ່າ ສະມະນະພາມທັງໝົດນັ້ນແລ ເປັນຄົນພານ ມີປັນຍາຊາມ

ຄຳວ່າ ສະມະນະພາມເຫຼົ່ານີ້ທັງໝົດນັ້ນແລ ຢຶດຖືທິດຖິຢູ່ ອະທິບາຍວ່າ ສະມະນະພາມເຫຼົ່ານີ້ທັງໝົດນັ້ນແລ ເປັນເຈົ້າລັດທິ ສະມະນະພາມເຫຼົ່ານັ້ນ ຢຶດ ຢຶດຖື ຖື ຢຶດໝັ້ນ ຖືໝັ້ນທິດຖິແນວໃດແນວໜຶ່ງບັນດາທິດຖິ ໖໘ ແລ້ວ ຢູ່ ຄື ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງຕາມທິດຖິຂອງຕົນ ໆ ເໝືອນພວກຄະລືຫັດຜູ້ຄອງເຮືອນກໍຢູ່ໃນເຮືອນ ໝູ່ພິກຂຸຜູ້ມີອາບັດກໍຢູ່ໃນອາບັດ ຫຼື ພວກປຸຖຸຊົນຜູ້ມີກິເລດກໍຢູ່ໃນກິເລດ ສັນໃດ ສະມະນະພາມເຫຼົ່ານີ້ທັງໝົດນັ້ນແລ ເປັນເຈົ້າລັດທິ ສະມະນະພາມເຫຼົ່ານັ້ນ ຢຶດ ຢຶດຖື ຖື ຢຶດໝັ້ນ ຖືໝັ້ນ ທິດຖິແນວໃດແນວໜຶ່ງ ບັນດາທິດຖິ ໖໘ ແລ້ວ ຢູ່ ຄື ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງຕາມທິດຖິຂອງຕົນ ໆ ສັນນັ້ນຄືກັນ ລວມຄວາມວ່າ ສະມະນະພາມເຫຼົ່ານີ້ທັງໝົດນັ້ນແລ ຢຶດຖືທິດຖິຢູ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ຄົນພານບໍ່ຍອມຮັບທຳຂອງຜູ້ອື່ນເລີຍ
ເປັນຄົນຕ່ຳຊາມ ມີປັນຍາຊາມ
ສະມະນະພາມທັງໝົດນັ້ນແລເປັນຄົນພານ ມີປັນຍາຊາມ
ສະມະນະພາມເຫຼົ່ານີ້ທັງໝົດນັ້ນແລ ຢຶດຖືທິດຖິຢູ່

[໑໑໖] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ຖ້າພວກສະມະນະພາມ ບໍ່ຜ່ອງແຜ້ວຍ້ອນທິດຖິຂອງຕົນ
ເປັນຜູ້ມີປັນຍາມົດຈົດດີ ສະຫຼາດ ມີຄວາມຮູ້ແທ້ແລ້ວ
ບັນດາສະມະນະພາມເຫຼົ່ານັ້ນ ກໍບໍ່ມີໃຜເສື່ອມປັນຍາ
ຍ້ອນທິດຖິຂອງສະມະນະພາມແມ່ນເຫຼົ່ານັ້ນ ຖືກັນມາແນວນັ້ນ

ຄຳວ່າ ຖ້າພວກສະມະນະພາມ ບໍ່ຜ່ອງແຜ້ວຍ້ອນທິດຖິຂອງຕົນ ອະທິບາຍວ່າ ພວກສະມະນະພາມບໍ່ຜ່ອງແຜ້ວ ຄື ບໍ່ຜ່ອງໃສ ບໍ່ແຈ່ມໃສ ເສົ້າໝອງ ໝົ່ນໝອງ ຍ້ອນທິດຖິຂອງຕົນ ຄືຍ້ອນຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ ລວມຄວາມວ່າ ຖ້າພວກສະມະນະພາມ ບໍ່ຜ່ອງແຜ້ວຍ້ອນທິດຖິຂອງຕົນ

ຄຳວ່າ ເປັນຜູ້ມີປັນຍາມົດຈົດດີ ສະຫຼາດ ມີຄວາມຮູ້ແທ້ແລ້ວ ອະທິບາຍວ່າ ເປັນຜູ້ມີປັນຍາມົດຈົດ ຄື ມີປັນຍາສະອາດ ມີປັນຍາບໍລິສຸດ ມີປັນຍາຜ່ອງໃສ ມີປັນຍາ ແຈ່ມໃສ

ອີກໄນໜຶ່ງ ເປັນຜູ້ມີຄວາມເຫັນມົດຈົດ ມີຄວາມເຫັນສະອາດ ມີຄວາມເຫັນບໍລິສຸດມີຄວາມເຫັນຜ່ອງໃສ ມີຄວາມເຫັນແຈ່ມໃສ ລວມຄວາມວ່າ ເປັນຜູ້ມີປັນຍາມົດຈົດດີ

ຄຳວ່າ ສະຫຼາດ ໄດ້ແກ່ ສະຫຼາດ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ເປັນຜູ້ມີປັນຍາມົດຈົດດີ ສະຫຼາດ

ຄຳວ່າ ມີຄວາມຮູ້ ໄດ້ແກ່ ມີຄວາມຮູ້ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງ ຕັດສະຣູ້ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ເປັນຜູ້ມີປັນຍາ ມົດຈົດດີ ສະຫຼາດ ມີຄວາມຮູ້ແລ້ວ

ຄຳວ່າ ບັນດາສະມະນະພາມເຫຼົ່ານັ້ນ ກໍບໍ່ມີໃຜເສື່ອມປັນຍາ ອະທິບາຍວ່າ ບັນດາສະມະນະພາມເຫຼົ່ານັ້ນ ກໍບໍ່ມີໃຜມີປັນຍາຊົ່ວ ມີປັນຍາຊາມ ມີປັນຍາຕ່ຳຊາມ ມີປັນຍາໜ້າ ຮັງກຽດ ມີປັນຍາຫຍາບຊ້າ ມີປັນຍາຕ່ຳຕ້ອຍ

ອີກໄນໜຶ່ງ ສະມະນະພາມທັງໝົດນັ້ນແລ ເປັນຜູ້ມີປັນຍາເລີດ ມີປັນຍາປະເສີດ ມີປັນຍາວິເສດ ມີປັນຍານຳໜ້າ ມີປັນຍາສູງສຸດ ມີປັນຍາປະເສີດສຸດ ລວມຄວາມວ່າ ບັນດາສະມະນະພາມເຫຼົ່ານັ້ນ ກໍບໍ່ມີໃຜເສື່ອມປັນຍາ

ຄຳວ່າ ຍ້ອນທິດຖິຂອງສະມະນະພາມແມ່ນເຫຼົ່ານັ້ນ ຖືກັນມາແນວນັ້ນ ອະທິບາຍວ່າ ທິດຖິຂອງສະມະນະພາມເຫຼົ່ານັ້ນ ຖືກັນມາ ຄື ສະມາທານ ຖື ຍຶດໝັ້ນ ຖືໝັ້ນ ຕິດໃຈ ນ້ອມໃຈເຊື່ອກັນມາແນວນັ້ນ ລວມຄວາມວ່າ ຍ້ອນທິດຖິຂອງສະມະນະພາມແມ່ນເຫຼົ່ານັ້ນ ຖືກັນມາແນວນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຖ້າພວກສະມະນະພາມ ບໍ່ຜ່ອງແຜ້ວຍ້ອນທິດຖິຂອງຕົນ
ເປັນຜູ້ມີປັນຍາມົດຈົດດີ ສະຫຼາດ ມີຄວາມຮູ້ແທ້ແລ້ວ
ບັນດາສະມະນະພາມເຫຼົ່ານັ້ນ ກໍບໍ່ມີໃຜເສື່ອມປັນຍາ
ຍ້ອນທິດຖິຂອງສະມະນະພາມແມ່ນເຫຼົ່ານັ້ນ ຖືກັນມາແນວນັ້ນ

[໑໑໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄົນ ໔ ພວກກ່າວທິດຖິໃດຕໍ່ກັນແລະກັນວ່າ ເປັນຄົນພານ
ເຮົາບໍ່ກ່າວທິດຖິນັ້ນວ່າຈິງ
ພວກສະມະນະພາມພາກັນປະກາດທິດຖິຂອງຕົນ ໆ ວ່າຈິງ
ຍ້ອນແນວນັ້ນ ຈຶ່ງພາກັນໃສ່ໄພຜູ້ອື່ນວ່າ ເປັນຄົນພານ

ຄຳວ່າ ບໍ່ ໃນຄຳວ່າ ເຮົາບໍ່ກ່າວທິດຖິນັ້ນວ່າຈິງ ເປັນຄຳປະຕິເສດ

ຄຳວ່າ ນັ້ນ ໄດ້ແກ່ ທິດຖິ ໖໔ ອະທິບາຍວ່າ ເຮົາບໍ່ກ່າວ ຄື ບໍ່ບອກ ບໍ່ສະແດງ ບໍ່ບັນຍັດ ບໍ່ກຳນົດ ບໍ່ເປີດເຜີຍ ບໍ່ຈຳແນກ ບໍ່ເຮັດໃຫ້ງ່າຍ ບໍ່ປະກາດທິດຖິນັ້ນ ວ່າຈິງ ຄື ແທ້ ເປັນຈິງ ແນ່ນອນ ບໍ່ວິປະຣິດ ລວມຄວາມວ່າ ເຮົາບໍ່ກ່າວທິດຖິນັ້ນວ່າຈິງ

ຄຳວ່າ ຄົນ ໔ ພວກ ໃນຄຳວ່າ ຄົນ ໔ ພວກກ່າວທິດຖິໃດຕໍ່ກັນແລະກັນວ່າ ເປັນຄົນພານ ອະທິບາຍວ່າ ຄົນ ໔ ພວກ ຄື ຄົນກໍ່ການຜິດຖຽງກັນ ໔ ພວກ ຄົນກໍ່ການໝາງໃຈກັນ ໔ ພວກ ຄົນກໍ່ການອື້ສາວກັນ ໔ ພວກ ຄົນກໍ່ການວິວາດກັນ ໔ ພວກ ຄົນກໍ່ອະທິກອນກັນ ໔ ພວກ ຄນວ່າຮ້າຍກັນ ໔ ພວກ ຄົນໂຕ້ຖຽງກັນ ໔ ພວກ ຄົນເຫຼົ່ານັ້ນກ່າວຫາກັນແລະກັນແບບນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງແບບນີ້ວ່າ ເປັນຄົນພານ ຄື ເປັນຄົນຊົ່ວ ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ຄົນ ໔ ພວກກ່າວທິດຖິໃດຕໍ່ກັນ ແລະກັນວ່າເປັນຄົນພານ

ຄຳວ່າ ພວກສະມະນະພາມພາກັນປະກາດທິດຖິຂອງຕົນ ໆ ວ່າຈິງ ອະທິບາຍວ່າ ພາກັນປະກາດທິດຖິຂອງຕົນ ໆ ວ່າຈິງວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນ ໂມຄະ ຯລຯ ໂລກບໍ່ທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ພາກັນປະກາດທິດຖິ ຂອງຕົນ ໆ ວ່າຈິງ ວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກ ກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ພວກສະມະນະພາມພາກັນ ປະກາດທິດຖິຂອງຕົນ ໆ ວ່າຈິງ

ຄຳວ່າ ຍ້ອນແບບນັ້ນ ໃນຄຳວ່າ ຍ້ອນແບບນັ້ນ ຈຶ່ງພາກັນໃສ່ໄຟຜູ້ອື່ນວ່າ ເປັນຄົນພານ ໄດ້ແກ່ ຍ້ອນແບບນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນຈຶ່ງພາກັນໃສ່ໄຟຜູ້ອື່ນ ຄື ເຫັນ ເບິ່ງເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາ ເບິ່ງວ່າ ເປັນຄົນພານຄືເປັນຄົນຊົ່ວ ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ຍ້ອນແບບນັ້ນຈຶ່ງພາກັນໃສ່ໄຟຜູ້ອື່ນວ່າ ເປັນຄົນພານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄົນ ໔ ພວກກ່າວທິດຖິໃດຕໍ່ກັນແລະກັນວ່າ ເປັນຄົນພານ
ເຮົາບໍ່ກ່າວທິດຖິນັ້ນວ່າຈິງ
ພວກສະມະນະພາມພາກັນປະກາດທິດຖິຂອງຕົນ ໆ ວ່າຈິງ
ຍ້ອນແບບນັ້ນ ຈຶ່ງພາກັນໃສ່ໄຟຜູ້ອື່ນວ່າ ເປັນຄົນພານ

[໑໑໗] (ພຣະພຸດທະເນຣະມິດທູນຖາມວ່າ)

ສະມະນະພາມບາງພວກກ່າວທຳໃດວ່າຈິງ ວ່າແທ້
ສະມະນະພາມພວກອື່ນກໍພາກັນກ່າວທຳນັ້ນວ່າເປົ່າ ວ່າຕົວະ
ສະມະນະພາມເຫຼົ່ານັ້ນຕ່າງພາກັນຖືໝັ້ນແມ່ນແບບນີ້ແລ້ວວິວາດກັນ
ຍ້ອນເຫດໃດ ພວກສະມະນະພາມຈຶ່ງບໍ່ເວົ້າແບບດຽວກັນ

ຄຳວ່າ ສະມະນະພາມບາງພວກກ່າວທຳໃດວ່າຈິງ ວ່າແທ້ ອະທິບາຍວ່າ ສະມະນະພາມບາງພວກ ກ່າວແນວນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ເຊິ່ງທຳ ຄື ທິດຖິ ປະຕິປະທາ ມັກໃດແນວນີ້ວ່າ ທຳນີ້ ຈິງ ແທ້ ເປັນຈິງ ແນ່ນອນ ບໍ່ວິປະຣິດ ລວມຄວາມວ່າ ສະມະນະພາມບາງພວກກ່າວທຳໃດວ່າຈິງ ວ່າແທ້

ຄຳວ່າ ສະມະນະພາມພວກອື່ນກໍພາກັນກ່າວທຳນັ້ນວ່າເປົ່າ ວ່າຕົວະ ອະທິບາຍວ່າ ສະມະນະພາມອີກພວກໜຶ່ງ ກໍພາກັນກ່າວແນວນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງເຊິ່ງທຳ ຄື ທິດຖິ ປະຕິປະທາ ມັກ ນັ້ນ ໆແລແນວນີ້ວ່າ ທຳນັ້ນເປົ່າ ທຳນັ້ນຕົວະ ທຳນັ້ນບໍ່ເປັນຈິງ ທຳນັ້ນເຫຼາະແຫຼະທຳນັ້ນບໍ່ແນ່ນອນ ລວມຄວາມວ່າສະມະນະພາມພວກອື່ນກໍພາກັນກ່າວທຳນັ້ນວ່າເປົ່າ ວ່າຕົວະ

ຄຳວ່າ ສະມະນະພາມເຫຼົ່ານັ້ນຕ່າງພາກັນຖືໝັ້ນແມ່ນແນວນີ້ແລ້ວວິວາດກັນ ອະທິບາຍວ່າ ສະມະນະພາມເຫຼົ່ານັ້ນຕ່າງພາກັນຍຶດ ຍຶດຖື ຖື ຍຶດໝັ້ນ ຖືໝັ້ນແນວນີ້ແລ້ວວິວາດກັນ ຄື ກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການຍາດແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍກັນວ່າ ທ່ານບໍ່ຮູ້ທຳວິໄນນີ້ ຯລຯ ຫຼື ຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ ລວມຄວາມວ່າ ສະມະນະພາມເຫຼົ່ານັ້ນຕ່າງພາກັນຖືໝັ້ນແມ່ນແນວນີ້ແລ້ວວິວາດກັນ

ຄຳວ່າ ຍ້ອນເຫດໃດ ໃນຄຳວ່າ ຍ້ອນເຫດໃດ ພວກສະມະນະພາມ ຈຶ່ງບໍ່ເວົ້າແນວດຽວກັນ ອະທິບາຍວ່າ ຍ້ອນເຫດໃດ ຄື ຍ້ອນການໃດ ຍ້ອນອັນໃດເປັນເຫດ ຍ້ອນອັນໃດເປັນປັດໄຈ ຍ້ອນອັນໃດເປັນຕົ້ນເຫດ ຍ້ອນອັນໃດເປັນເຫດເກີດ ຍ້ອນອັນໃດເປັນກຳເນີດ ຍ້ອນອັນໃດເປັນແດນເກີດ ສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ ຄື ເວົ້າໄປຕ່າງ ໆ ຫຼາຍຢ່າງ ເວົ້າແນວນັ້ນແນວນີ້ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງຫຼາຍຢ່າງ ລວມຄວາມວ່າ ຍ້ອນເຫດໃດ ພວກສະມະນະພາມ ຈຶ່ງບໍ່ເວົ້າແນວດຽວກັນ ດ້ວຍເຫດນັ້ນພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ສະມະນະພາມບາງພວກກ່າວທຳໃດວ່າຈິງ ວ່າແທ້
ສະມະນະພາມພວກອື່ນກໍພາກັນກ່າວທຳນັ້ນວ່າເປົ່າ ວ່າຕົວະ
ສະມະນະພາມເຫຼົ່ານັ້ນຕ່າງພາກັນຖືໝັ້ນແມ່ນແນວນີ້ແລ້ວວິວາດກັນ
ຍ້ອນເຫດໃດ ພວກສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ

[໑໑໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ໝູ່ຊົນຮູ້ແຈ້ງສັດຈະໃດບໍ່ເພິ່ງວິວາດກັນ
ສັດຈະນັ້ນມີຢ່າງດຽວເທົ່ານັ້ນ ບໍ່ມີຢ່າງທີ ໒
ສະມະນະພາມເຫຼົ່ານັ້ນພາກັນອວດສັດຈະຕ່າງ ໆ ກັນໄປເອງ
ຍ້ອນແນວນັ້ນ ພວກສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ

## ວ່າດ້ວຍສັດຈະມີຢ່າງດຽວ

ຄຳວ່າ ສັດຈະນັ້ນມີຢ່າງດຽວເທົ່ານັ້ນ ບໍ່ມີຢ່າງທີ ໒ ອະທິບາຍວ່າ ນິບພານ ຄື ຄວາມດັບທຸກ ໄດ້ແກ່ ຄວາມຣະງັບສັງຂານທັງປວງ ຄວາມສະລັດຖິ້ມອຸປະທິທັງໝົດ ຄວາມສິ້ນຕັນຫາ ຄວາມຄາຍກຳໜັດ ຄວາມດັບກິເລດ ຄວາມເປັນສະນິດ ຕັດຮຽກວ່າ ສັດຈະຢ່າງດຽວ

ອີກໄນໜຶ່ງ ມັກ ສັດຈະ ເປັນສັດຈະທີ່ເປັນເຫດນຳສັດອອກຈາກທຸກ ຄື ທຸກຂະນິໂຣທະຄາມິນີປະຕິປະທາ ໄດ້ແກ່ ອະຣິຍະມັກມີອົງ ໘ ຄື

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັປປະ | (ດຳຣິຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ກະທຳຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີບຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ຕັດຮຽກວ່າ ສັດຈະຢ່າງດຽວ ລວມຄວາມວ່າ ຍ້ອນສັດຈະນັ້ນ ມີຢ່າງດຽວເທົ່ານັ້ນ ບໍ່ມີຢ່າງທີ ໒

ຄຳວ່າ ໃດ ໃນຄຳວ່າ ໝູ່ຊົນຮູ້ແຈ້ງສັດຈະໃດບໍ່ເພິ່ງວິວາດກັນ ໄດ້ແກ່ ໃນສັດຈະໃດ?

ຄຳວ່າ ໝູ່ສັດ ເປັນຊື່ຮຽກສັດ

ຄຳວ່າ ຮູ້ແຈ້ງ ອະທິບາຍວ່າ ຮູ້ແຈ້ງ ຄື ຮູ້ທົ່ວ ຮູ້ແຈ່ມແຈ້ງ ຮູ້ສະເພາະ ແທງຕະຫຼອດສັດຈະໃດ ບໍ່ເພິ່ງກໍ່ການຜິດຖຽງ ບໍ່ເພິ່ງກໍ່ການໝາງໃຈ ບໍ່ເພິ່ງກໍ່ການຍາດແຍ່ງ ບໍ່ເພິ່ງກໍ່ການ ວິວາດ ບໍ່ເພິ່ງກໍ່ການມຸ້ງຮ້າຍ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການຜິດຖຽງ ການໝາງໃຈ ການຍາດແຍ່ງ ການວິວາດ ການມຸ້ງຮ້າຍ ລວມຄວາມວ່າ ໝູ່ຊົນຮູ້ແຈ້ງສັດຈະໃດບໍ່ເພິ່ງວິວາດກັນ

ຄຳວ່າ ສະມະນະພາມເຫຼົ່ານັ້ນພາກັນອວດສັດຈະຕ່າງ ໆ ກັນໄປເອງ ອະທິບາຍວ່າ ສະມະນະພາມເຫຼົ່ານັ້ນ ພາກັນອວດ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງສັດຈະຕ່າງ ໆ ກັນໄປເອງວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ

ສະມະນະພາມເຫຼົ່ານັ້ນ ພາກັນອວດ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງສັດຈະ ຕ່າງ ໆ ກັນໄປເອງວ່າ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ສະມະນະພາມ ເຫຼົ່ານັ້ນພາກັນອວດສັດຈະຕ່າງ ໆ ກັນໄປເອງ

ຄຳວ່າ ຍ້ອນແນວນັ້ນ ໃນຄຳວ່າ ຍ້ອນແນວນັ້ນ ພວກສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ ອະທິບາຍວ່າ ຍ້ອນແນວນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນ

ເຫດນັ້ນ ພວກສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ ຄື ເວົ້າໄປ ຕ່າງ ໆ ເວົ້າຫຼາຍຢ່າງ ເວົ້າແນວນັ້ນແນວນີ້ ເວົ້າ ຄື ກ່າວ ບອກ ສະແດງ ຊີ້ແຈ່ງ ຫຼວງຫຼາຍ ລວມຄວາມວ່າ ຍ້ອນແນວນັ້ນ ພວກສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ໝູ່ຊົນຮູ້ແຈ້ງສັດຈະໃດບໍ່ເພິ່ງວິວາດກັນ
ສັດຈະນັ້ນມີຢ່າງດຽວເທົ່ານັ້ນ ບໍ່ມີຢ່າງທີ ໒
ສະມະນະພາມເຫຼົ່ານັ້ນພາກັນອວດສັດຈະຕ່າງ ໆ ກັນໄປເອງ
ຍ້ອນແນວນັ້ນ ພວກສະມະນະພາມຈຶ່ງບໍ່ເວົ້າແນວດຽວກັນ

[໑໒໐] (ພຣະພຸດທະເນຣະມິດທູນຖາມວ່າ)

ຍ້ອນເຫດໃດນໍ ພວກສະມະນະພາມຈຶ່ງເວົ້າສັດຈະໄປຕ່າງ ໆ
ອ້າງຕົນວ່າເປັນຄົນສະຫຼາດ ເວົ້າພ່ຳກັນໄປ
ສັດຈະທີ່ສະມະນະພາມເຫຼົ່ານັ້ນຮ່ຳຮຽນມາ
ມີຫຼາຍຢ່າງຕ່າງ ໆ ກັນບໍ
ຫຼືວ່າສະມະນະພາມເຫຼົ່ານັ້ນພາກັນນຶກຄິດເອົາເອງ

ຄຳວ່າ ຍ້ອນເຫດໃດ ໃນຄຳວ່າ ຍ້ອນເຫດໃດນໍ ພວກສະມະນະພາມ ຈຶ່ງເວົ້າສັດຈະໄປຕ່າງ ໆ ອະທິບາຍວ່າ ຍ້ອນເຫດໃດ ຄື ຍ້ອນການໃດ ຍ້ອນອັນໃດ ເປັນເຫດ ຍ້ອນອັນໃດເປັນປັດໄຈ ຍ້ອນອັນໃດເປັນຕົ້ນເຫດ ພວກສະມະນະພາມຈຶ່ງເວົ້າ ສັດຈະໄປຕ່າງ ໆ ຄື ເວົ້າຫຼາຍຢ່າງ ເວົ້າແນວນັ້ນແນວນີ້ ເວົ້າ ຄື ກ່າວ ບອກ ສະແດງ ຊີ້ແຈ່ງຫຼວງຫຼາຍ ລວມຄວາມວ່າ ຍ້ອນເຫດໃດນໍ ພວກສະມະນະພາມຈຶ່ງເວົ້າສັດຈະໄປຕ່າງ ໆ

ຄຳວ່າ ເວົ້າພ່ຳກັນໄປ ໃນຄຳວ່າ ອ້າງຕົນວ່າເປັນຄົນສະຫຼາດ ເວົ້າພ່ຳກັນໄປ ອະທິບາຍວ່າ ຍ້ອນເວົ້າພ່ຳເພີ້ໄປ ຈຶ່ງຊື່ວ່າເວົ້າພ່ຳກັນໄປ

ອີກໄນໜຶ່ງ ພວກສະມະນະພາມເວົ້າພ່ຳ ຄື ກ່າວ ບອກ ສະແດງ ຊີ້ແຈ່ງທິດຖິ ຂອງຕົນ ໆ ວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ພວກສະມະນະພາມ ເວົ້າພ່ຳ ຄື ກ່າວ ບອກ ສະແດງ ຊີ້ແຈ່ງທິດຖິຂອງຕົນ ໆ ວ່າ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນ ເປັນໂມຄະ

ຄຳວ່າ ອ້າງຕົນວ່າເປັນຄົນສະຫຼາດ ໄດ້ແກ່ ອ້າງຕົນວ່າເປັນຄົນສະຫຼາດ ຄື ກ່າວອ້າງວ່າເປັນບັນດິດ ອ້າງວ່າເປັນນັກປາດ ອ້າງວ່າມີຄວາມຮູ້ ອ້າງວ່າມີເຫດຜົນ ອ້າງວ່າມີຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າ ອ້າງຕົນວ່າເປັນ ຄົນສະຫຼາດ ເວົ້າພ່ຳກັນໄປ

ຄຳວ່າ ສັດຈະທີ່ສະມະນະພາມເຫຼົ່ານັ້ນຮ່ຳຮຽນມາ ມີຫຼາຍຢ່າງຕ່າງ ໆ ກັນບໍ ອະທິບາຍວ່າ ສັດຈະທີ່ສະມະນະພາມເຫຼົ່ານັ້ນຮ່ຳຮຽນມາ ມີຫຼາຍຢ່າງຕ່າງ ໆ ກັນ ຄື ມີຫຼາຍຢ່າງ ເປັນແນວນັ້ນແນວນີ້ ຫຼວງຫຼາຍ ລວມຄວາມວ່າ ສັດຈະທີ່ ສະມະນະພາມເຫຼົ່ານັ້ນຮ່ຳຮຽນມາ ມີຫຼາຍຢ່າງຕ່າງ ໆ ກັນບໍ

ຄຳວ່າ ຫຼືວ່າ ສະມະນະພາມເຫຼົ່ານັ້ນພາກັນນຶກຄິດເອົາເອງ ອະທິບາຍວ່າ ຫຼືວ່າ ສະມະນະພາມເຫຼົ່ານັ້ນ ດຳເນີນໄປ ອອກໄປ ຖືກພາໄປ ຖືກນຳໄປ ດ້ວຍຄວາມນຶກ ຄື ດ້ວຍຄວາມວິຕົກ ຄວາມດຳຣິ ລວມຄວາມວ່າ ຫຼືວ່າ ສະມະນະພາມເຫຼົ່ານັ້ນພາກັນນຶກຄິດເອົາເອງ ແນວນີ້ແດ່ອີກໄນໜຶ່ງ ສະມະນະພາມເຫຼົ່ານັ້ນພາກັນກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງສັດຈະທີ່ຕົນປະມວນມາດ້ວຍຄວາມນຶກ ທີ່ຕົນປະພຶດຕາມດ້ວຍການພິຈາລະນາ ຮ່ຳເພີງ ທີ່ຮູ້ເອງ ລວມຄວາມວ່າ ສະມະນະພາມເຫຼົ່ານັ້ນພາກັນນຶກຄິດເອົາເອງ ແນວນີ້ແດ່ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ຍ້ອນເຫດໃດນໍ ພວກສະມະນະພາມຈຶ່ງເວົ້າສັດຈະໄປຕ່າງ ໆ<br>
ອ້າງຕົນວ່າເປັນຄົນສະຫຼາດ ເວົ້າພ່ຳກັນໄປ<br>
ສັດຈະທີ່ສະມະນະພາມເຫຼົ່ານັ້ນຮ່ຳຮຽນມາ<br>
ມີຫຼາຍຢ່າງຕ່າງ ໆ ກັນບໍ<br>
ຫຼືວ່າສະມະນະພາມເຫຼົ່ານັ້ນພາກັນນຶກຄິດເອົາເອງ

[໑໘໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບໍ່ໄດ້ມີສັດຈະຫຼາຍຢ່າງຕ່າງ ໆ ກັນເລີຍ<br>
ເວັ້ນແຕ່ສັດຈະທີ່ແນ່ນອນດ້ວຍສັນຍາໃນໂລກ<br>
ແຕ່ສະມະນະພາມທັງຫຼາຍ<br>
ພາກັນກຳນົດຄວາມນຶກໃນທິດຖິທັງຫຼາຍໄປເອງ<br>
ແລ້ວກ່າວທຳເປັນ ໒ ຢ່າງວ່າ<br>
ຄຳຂອງເຮົາຈິງ ຄຳຂອງທ່ານຕົວະ

## ວ່າດ້ວຍຄວາມຈິງບໍ່ຕ່າງກັນ

ຄຳວ່າ ບໍ່ໄດ້ມີສັດຈະຫຼາຍຢ່າງຕ່າງ ໆ ກັນເລີຍ ອະທິບາຍວ່າ ບໍ່ໄດ້ມີສັດຈະ ຫຼາຍຢ່າງຕ່າງ ໆ ກັນ ຄື ບໍ່ໄດ້ມີຫຼາຍຢ່າງ ເປັນແນວນັ້ນແນວນີ້ເລີຍ ລວມຄວາມວ່າ ບໍ່ໄດ້ມີສັດຈະຫຼາຍຢ່າງຕ່າງ ໆ ກັນເລີຍ

ຄຳວ່າ ເວັ້ນແຕ່ສັດຈະທີ່ແນ່ນອນດ້ວຍສັນຍາໃນໂລກ ອະທິບາຍວ່າ ເວັ້ນແຕ່ສັດຈະທີ່ຖື ວ່າແນ່ນອນດ້ວຍສັນຍາ ສັດຈະຢ່າງດຽວເທົ່ານັ້ນທີ່ບັນດິດກ່າວ ບອກ ສະແດງ ຊີ້ແຈ່ງໄວ້ໃນ ໂລກ ໄດ້ແກ່ ນິບພານ ຄື ຄວາມດັບທຸກ ຄວາມຣະງັບສັງຂານທັງປວງ ຄວາມສະລັດຖິ້ມ ອຸປະ ທິທັງໝົດ ຄວາມສິ້ນຕັນຫາ ຄວາມຄາຍກຳໜັດ ຄວາມດັບກິເລດ ຄວາມເຢັນສະນິດ

ອີກໄນໜຶ່ງ ມັກ ສັດຈະ ຄື ສັດຈະທີ່ເປັນເຫດນຳສັດອອກຈາກທຸກ ທຸກຂະນິໂຣທະຄາມິ ນີປະຕິປະທາ ອະຣິຍະມັກມີອົງ ໘ ຄື

໑. ສຳມາທິດຖິ

ຯລຯ

໘. ສຳມາສະມາທິ

ຕັດຮຽກວ່າ ສັດຈະຢ່າງດຽວ ລວມຄວາມວ່າ ເວັ້ນແຕ່ສັດຈະທີ່ແນ່ນອນດ້ວຍສັນຍາໃນໂລກ

ຄຳວ່າ ແຕ່ສະມະນະພາມທັງຫຼາຍ ພາກັນກຳນົດຄວາມນຶກໃນທິດຖິທັງຫຼາຍໄປເອງແລ້ວ ກ່າວທຳເປັນ ໔ ຢ່າງວ່າ ຄຳຂອງເຮົາຈິງ ຄຳຂອງທ່ານຕົວະ ອະທິບາຍວ່າ ພວກ ສະມະນະ ພາມພາກັນນຶກ ຕອງ ດຳຣິ ແລ້ວທຳທິດຖິໃຫ້ເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນ ເມື່ອທຳທິດຖິໃຫ້ເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນແລ້ວກໍກ່າວແນວນີ້ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງແນວນີ້ວ່າ ຄຳຂອງເຮົາຈິງ ຄຳຂອງທ່ານຕົວະ ລວມຄວາມວ່າ ແຕ່ສະມະນະ ພາມທັງຫຼາຍພາກັນກຳນົດຄວາມນຶກໃນທິດຖິທັງຫຼາຍໄປເອງ ແລ້ວກ່າວທຳເປັນ ໔ ຢ່າງວ່າ ຄຳ ຂອງເຮົາຈິງ ຄຳຂອງທ່ານຕົວະ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ບໍ່ໄດ້ມີສັດຈະຫຼາຍຢ່າງຕ່າງ ໆ ກັນເລີຍ
ເວັ້ນແຕ່ສັດຈະທີ່ແນ່ນອນດ້ວຍສັນຍາໃນໂລກ
ແຕ່ສະມະນະພາມທັງຫຼາຍ
ພາກັນກຳນົດຄວາມນຶກໃນທິດຖິທັງຫຼາຍໄປເອງ
ແລ້ວກ່າວທຳເປັນ ໔ ຢ່າງວ່າ
ຄຳຂອງເຮົາຈິງ ຄຳຂອງທ່ານຕົວະ

[໑໘໔] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ເຈົ້າລັດທິອາໄສທຳເຫຼົ່ານີ້ ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ
ສິນແລະຂໍ້ວັດ ຫຼືອາລົມທີ່ຮັບຮູ້ແລ້ວ ສະແດງອາການດູໝິ່ນ
ແລະດຳຣົງຢູ່ໃນທິດຖິທີ່ຕົກລົງໃຈແລ້ວກໍຣ່າເຣີງ
ກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ
ເຈົ້າລັດທິສະແດງຄວາມດູໝິ່ນຜູ້ອື່ນ

ຄຳວ່າ ເຈົ້າລັດທິອາໄສທຳເຫຼົ່ານີ້ ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ ສິ່ນແລະຂໍ້ວັດ ຫຼື ອາລົມທີ່ຮັບຮູ້ແລ້ວ ສະແດງອາການດູໝິ່ນ ອະທິບາຍວ່າ ເຈົ້າລັດທິອາໄສ ຄື ເຂົ້າໄປ ອາໄສ ຖື ຍຶດໝັ້ນ ຖືໝັ້ນຮູບທີ່ເຫັນ ຫຼື ຄວາມມົດຈິດຍ້ອນຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ຄວາມມົດຈິດຍ້ອນສຽງທີ່ໄດ້ຍິນ ສິນ ຫຼື ຄວາມມົດຈິດຍ້ອນສິນ ຂໍ້ວັດ ຫຼື ຄວາມມົດຈິດຍ້ອນຂໍ້ວັດ ອາລົມທີ່ຮັບຮູ້ ຫຼື ຄວາມມົດຈິດຍ້ອນອາລົມທີ່ຮັບຮູ້ ລວມຄວາມວ່າ ເຈົ້າລັດທິອາໄສທຳເຫຼົ່ານີ້ ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ ສິນແລະຂໍ້ວັດ ຫຼື ອາລົມທີ່ຮັບຮູ້ແລ້ວ

ຄຳວ່າ ເຈົ້າລັດທິອາໄສທຳເຫຼົ່ານີ້ ໆລໆ ແລ້ວ ສະແດງອາການດູໝິ່ນ ອະທິບາຍວ່າ ເຈົ້າລັດທິບໍ່ນັບຖື ຈຶ່ງຊື່ວ່າສະແດງອາການດູໝິ່ນແດ່ ອີກໄນໜຶ່ງ ເຈົ້າລັດທິທຳໂທມະນັດ ໃຫ້ເກີດກໍຊື່ວ່າສະແດງອາການດູໝິ່ນແດ່ ລວມຄວາມວ່າ ເຈົ້າລັດທິອາໄສທຳເຫຼົ່ານີ້ ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ ສິນແລະຂໍ້ວັດ ຫຼືອາລົມທີ່ຮັບຮູ້ແລ້ວ ສະແດງອາການດູໝິ່ນ

ຄຳວ່າ ແລະດຳຣົງຢູ່ໃນທິດຖິທີ່ຕົກລົງໃຈແລ້ວກໍຮ່າເຣີງ ອະທິບາຍວ່າ ທິດຖິ ໗໘ ຕັດຮຽກວ່າ ທິດຖິທີ່ຕົກລົງໃຈແລ້ວ ເຈົ້າລັດທິ ດຳຣົງຢູ່ ຄື ຢືນຢັນຢູ່ ຖື ຍຶດໝັ້ນ ຖືໝັ້ນຢູ່ໃນ ທິດຖິທີ່ຕົກລົງໃຈແລ້ວ ລວມຄວາມວ່າ ດຳຣົງຢູ່ໃນທິດຖິທີ່ຕົກລົງໃຈແລ້ວ

ຄຳວ່າ ກໍຮ່າເຣີງ ໄດ້ແກ່ ຍິນດີ ຫົວ ຮ່າເຣີງ ພໍໃຈ ມີຄວາມດຳຣິບໍລິບູນແລ້ວ ອີກໄນໜຶ່ງ ຫົວຈົນແນມເຫັນແຂ້ວ ລວມຄວາມວ່າ ແລະດຳຣົງຢູ່ໃນທິດຖິທີ່ຕົກລົງໃຈແລ້ວກໍຮ່າເຣີງ

ຄຳວ່າ ກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ ອະທິບາຍວ່າ ກ່າວ ຄື ເວົ້າ ບອກສະແດງ ຊີ້ແຈ່ງແນວນີ້ວ່າ ຄົນອື່ນເປັນຄົນພານ ຄື ຊົ່ວ ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າຕ່ຳຕ້ອຍ ບໍ່ສະຫຼາດ ບໍ່ມີຄວາມຮູ້ ຕົກຢູ່ໃນອະວິດຊາ ບໍ່ມີຍານ ບໍ່ມີປັນຍາ ແຈ່ມແຈ້ງ ບໍ່ມີປັນຍາເຄື່ອງທຳລາຍກິເລດ ມີປັນຍາທຶບ ລວມຄວາມວ່າ ກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຈົ້າລັດທິອາໄສທຳເຫຼົ່ານີ້ ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ
ສິນແລະຂໍ້ວັດ ຫຼືອາລົມທີ່ຮັບຮູ້ແລ້ວ ສະແດງອາການດູໝິ່ນ
ແລະດຳຣົງຢູ່ໃນທິດຖິທີ່ຕົກລົງໃຈແລ້ວກໍຮ່າເຣີງ
ກ່າວວ່າ ຄົນອື່ນເປັນຄົນພານ ບໍ່ສະຫຼາດ

[໑໘໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຈົ້າລັດທິໃສ່ໄຟບຸກຄົນອື່ນວ່າ ເປັນຄົນພານ ຍ້ອນເຫດໃດ
ກໍກ່າວເຖິງຕົນເອງວ່າ ເປັນຄົນສະຫຼາດ ຍ້ອນເຫດນັ້ນ
ເຈົ້າລັດທິນັ້ນອວດອ້າງຕົນເອງວ່າເປັນຄົນສະຫຼາດ
ຍ່ອມດູໝິ່ນບຸກຄົນອື່ນແລະກ່າວເຊັ່ນນັ້ນຄືກັນ
ເຈົ້າລັດທິເຫັນຄົນອື່ນເປັນພານ

ຄຳວ່າ ເຈົ້າລັດທິໃສ່ໄຟບຸກຄົນອື່ນວ່າ ເປັນຄົນພານ ຍ້ອນເຫດໃດ ອະທິບາຍວ່າ ເຈົ້າລັດທິໃສ່ໄຟ ຄື ເຫັນ ເບິ່ງເຫັນ ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງບຸກຄົນອື່ນໂດຍຄວາມເປັນຄົນພານ ຄື ເປັນຄົນຊົ່ວ ຊາມ ຕໍ່າຊາມ ໜ້າຣັງກຽດ ຫຍາບຊ້າ ຕໍ່າຕ້ອຍ ຍ້ອນເຫດໃດ ຄື ຍ້ອນປັດໄຈໃດ ຍ້ອນການໃດ ຍ້ອນແດນເກີດໃດ ລວມຄວາມວ່າ ເຈົ້າລັດທິໃສ່ໄຟບຸກຄົນອື່ນວ່າ ເປັນຄົນພານ ຍ້ອນເຫດໃດ

ຄຳວ່າ ກໍກ່າວເຖິງຕົນເອງວ່າ ເປັນຄົນສະຫຼາດ ຍ້ອນເຫດນັ້ນ ອະທິບາຍວ່າ ຕົນ ຕັດຮຽກວ່າ ຕົນເອງ ເຈົ້າລັດທິແມ່ນນັ້ນກ່າວເຖິງຕົນເອງວ່າ ເຮົາເປັນຄົນສະຫຼາດ ຄື ເປັນບັນດິດມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ຍ້ອນເຫດນັ້ນ ຄື ຍ້ອນປັດໄຈນັ້ນ ຍ້ອນການນັ້ນ ຍ້ອນແດນເກີດນັ້ນ ລວມຄວາມວ່າ ກໍກ່າວເຖິງຕົນເອງວ່າ ເປັນຄົນສະຫຼາດ ຍ້ອນເຫດນັ້ນ

ຄຳວ່າ ເຈົ້າລັດທິນັ້ນອວດອ້າງຕົນເອງວ່າເປັນຄົນສະຫຼາດ ອະທິບາຍວ່າ ເຈົ້າລັດ ທິນັ້ນອວດອ້າງຕົນເອງວ່າ ເປັນຄົນສະຫຼາດ ຄື ກ່າວອ້າງວ່າເປັນບັນດິດ ອ້າງວ່າເປັນ ນັກປາດອ້າງວ່າມີຄວາມຮູ້ ອ້າງວ່າມີເຫດຜົນ ອ້າງວ່າມີຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າ ເຈົ້າລັດທິນັ້ນອວດອ້າງຕົນເອງວ່າເປັນຄົນສະຫຼາດ

ຄຳວ່າ ຍ່ອມດູໝິ່ນບຸກຄົນອື່ນແລະກ່າວເຊັ່ນນັ້ນຄືກັນ ອະທິບາຍວ່າ ເຈົ້າລັດທິບໍ່ນັບຖືຈຶ່ງຊື່ວ່າ ດູໝິ່ນຜູ້ອື່ນແດ່ ອີກໄນໜຶ່ງ ເຈົ້າລັດທິເຮັດໂທມະນັດໃຫ້ເກີດຈຶ່ງຊື່ວ່າ ດູໝິ່ນຜູ້ອື່ນແດ່

ຄຳວ່າ ແລະກ່າວເຊັ່ນນັ້ນຄືກັນ ໄດ້ແກ່ ກ່າວເຊັ່ນນັ້ນຄືກັນ ຄື ທິດຖິນັ້ນວ່າ ບຸກຄົນນີ້ມີຄວາມເຫັນຜິດ ມີຄວາມເຫັນວິປະຣິດ ແມ່ນດ້ວຍປະການແນວນີ້ ລວມຄວາມວ່າ ຍ່ອມດູໝິ່ນບຸກຄົນອື່ນ ແລະກ່າວເຊັ່ນນັ້ນຄືກັນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຈົ້າລັດທິໃສ່ໄຟບຸກຄົນອື່ນວ່າ ເປັນຄົນພານ ຍ້ອນເຫດໃດ
ກໍກ່າວເຖິງຕົນເອງວ່າ ເປັນຄົນສະຫຼາດ ຍ້ອນເຫດນັ້ນ
ເຈົ້າລັດທິນັ້ນອວດອ້າງຕົນເອງວ່າເປັນຄົນສະຫຼາດ
ຍ່ອມດູໝິ່ນບຸກຄົນອື່ນແລະກ່າວເຊັ່ນນັ້ນຄືກັນ

[໑໘໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຈົ້າລັດທິນັ້ນເປັນຜູ້ພຽບພ້ອມດ້ວຍອະຕິສາຣະທິດຖິ
ເມົາດ້ວຍຄວາມຖືຕົວ ມີຄວາມຖືຕົວຫຼາຍ ອະພິເສກຕົນເອງດ້ວຍໃຈ
ຍ້ອນທິດຖິນັ້ນເຈົ້າລັດທິຖືກັນມາແນວນັ້ນ
ທິດຖິ ໖໘ ຕັດຮຽກວ່າອະຕິສາຣະທິດຖິ

ຄຳວ່າ ເຈົ້າລັດທິນັ້ນເປັນຜູ້ພຽບພ້ອມດ້ວຍອະຕິສາຣະທິດຖິ ອະທິບາຍວ່າ ທິດຖິ ໖໘ ຕັດຮຽກວ່າ ອະຕິສາຣະທິດຖິ

ຍ້ອນເຫດໃດ ທິດຖິ ໖໘ ຈຶ່ງຕັດຮຽກວ່າ ອະຕິສາຣະທິດຖິ ຍ້ອນທິດຖິເຫຼົ່ານັ້ນທັງໝົດກ້າວລ່ວງເຫດ ກ້າວລ່ວງລັກສະນະ ກ້າວລ່ວງຖານະ ຍ້ອນເຫດນັ້ນ ທິດຖິ ໖໘ ຈຶ່ງຕັດຮຽກວ່າ ອະຕິສາຣະທິດຖິ ເດຍຣະຖີທຸກຈຳພວກ ເປັນຜູ້ມີອະຕິສາຣະທິດຖິ

ຍ້ອນເຫດໃດ ເດຍຣະຖີທຸກຈຳພວກ ຈຶ່ງຊື່ວ່າເປັນຜູ້ມີອະຕິສາຣະທິດຖິ ຍ້ອນເດຍຣະຖີເຫຼົ່ານັ້ນ ກ້າວລ່ວງ ຄື ກ້າວພົ້ນ ລ່ວງພົ້ນກັນແລະກັນ ທຳທິດຖິທັງຫຼາຍໃຫ້ເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນ ຍ້ອນເຫດນັ້ນ ເດຍຣະຖີທຸກຈຳພວກ ຈຶ່ງຊື່ວ່າເປັນຜູ້ມີອະຕິສາຣະທິດຖິ

ຄຳວ່າ ເຈົ້າລັດທິນັ້ນເປັນຜູ້ພຽບພ້ອມດ້ວຍອະຕິສາຣະທິດຖິ ອະທິບາຍວ່າ ເຈົ້າລັດທິເປັນຜູ້ພຽບພ້ອມ ຄື ບໍລິບູນ ບໍ່ບົກພ່ອງດ້ວຍອະຕິສາຣະທິດຖິ ລວມຄວາມວ່າ ເຈົ້າລັດທິນັ້ນເປັນຜູ້ພຽບພ້ອມດ້ວຍອະຕິສາຣະທິດຖິ

ຄຳວ່າ ເມົາດ້ວຍຄວາມຖືຕົວ ມີຄວາມຖືຕົວຫຼາຍ ອະທິບາຍວ່າ ເມົາ ຄື ຜະໝາດ ຄັ່ງຄັ່ງໄຄ້ດ້ວຍທິດຖິຂອງຕົນ ຄື ດ້ວຍຄວາມຖືຕົວຍ້ອນທິດຖິ ລວມຄວາມວ່າ ເມົາດ້ວຍຄວາມຖືຕົວ

ຄຳວ່າ ມີຄວາມຖືຕົວຫຼາຍ ໄດ້ແກ່ ມີຄວາມຖືຕົວຫຼາຍ ຄື ມີຄວາມຖືຕົວຫຼາຍ ມີຄວາມຖືຕົວບໍ່ບົກພ່ອງ ລວມຄວາມວ່າ ເມົາດ້ວຍຄວາມຖືຕົວ ມີຄວາມຖືຕົວຫຼາຍ

ຄຳວ່າ ອະພິເສກຕົນເອງດ້ວຍໃຈ ອະທິບາຍວ່າ ອະພິເສກຕົນເອງນັ້ນແລດ້ວຍຄວາມຄິດວ່າ ເຮົາເປັນຜູ້ສະຫຼາດ ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ອະພິເສກຕົນເອງດ້ວຍໃຈ

ຄຳວ່າ ຍ້ອນທິດຖິນັ້ນເຈົ້າລັດທິຖືກັນມາແນວນັ້ນ ອະທິບາຍວ່າ ທິດຖິນັ້ນເຈົ້າລັດທິຖືກັນມາແລ້ວ ຄື ສະມາທານແລ້ວ ຖືແລ້ວ ຍຶດໝັ້ນແລ້ວ ຖືໝັ້ນແລ້ວ ຕິດໃຈແລ້ວ ນ້ອມໃຈເຊື່ອແລ້ວແນວນັ້ນ ລວມຄວາມວ່າ ຍ້ອນທິດຖິນັ້ນເຈົ້າລັດທິຖືກັນມາແນວນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຈົ້າລັດທິນັ້ນເປັນຜູ້ພຽບພ້ອມດ້ວຍອະຕິສາຣະທິດຖິ
ເມົາດ້ວຍຄວາມຖືຕົວ ມີຄວາມຖືຕົວຫຼາຍ ອະພິເສກຕົນເອງດ້ວຍໃຈ
ຍ້ອນທິດຖິນັ້ນເຈົ້າລັດທິຖືກັນມາແນວນັ້ນ

[໑໘໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ອັນໜຶ່ງ ຫາກບຸກຄົນເປັນຜູ້ຊົ່ວຊາມຍ້ອນວາຈາຂອງຜູ້ອື່ນແລ້ວ
ເຂົາກໍເປັນຜູ້ມີປັນຍາຊາມພ້ອມກັບຜູ້ນັ້ນ
ແລະຖ້າຜູ້ຮຽນຈົບພຣະເວດ໋ເອງເປັນນັກປາດໄດ້ແລ້ວ
ບັນດາສະມະນະກໍບໍ່ມີໃຜເປັນຄົນພານ

ຄຳວ່າ ອັນໜຶ່ງ ຫາກບຸກຄົນເປັນຜູ້ຊົ່ວຊາມຍ້ອນວາຈາຂອງຜູ້ອື່ນແລ້ວ ອະທິບາຍວ່າ ຫາກບຸກຄົນອື່ນເປັນຄົນພານ ຊົ່ວ ຊົ່ວຊາມ ຄື ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ຍ້ອນວາຈາ ຄື ຍ້ອນຄຳເວົ້າຂອງຜູ້ອື່ນ ຍ້ອນເຫດທີ່ຖືກນິນທາ ຍ້ອນເຫດທີ່ຖືກຕິຕຽນ ຍ້ອນເຫດທີ່ຖືກວ່າຮ້າຍແລ້ວ ລວມຄວາມວ່າ ອັນໜຶ່ງຫາກບຸກຄົນເປັນຜູ້ຊົ່ວຊາມຍ້ອນວາຈາຂອງຜູ້ອື່ນແລ້ວ

ຄຳວ່າ ເຂົາກໍເປັນຜູ້ມີປັນຍາຊາມພ້ອມກັບຜູ້ນັ້ນ ອະທິບາຍວ່າ ແມ່ນເຂົາກໍເປັນຜູ້ມີປັນຍາຊົ່ວ ຄື ເປັນຜູ້ມີປັນຍາຊາມ ມີປັນຍາຕ່ຳຊາມ ມີປັນຍາໜ້າຣັງກຽດ ມີປັນຍາຫຍາບຊ້າ ມີປັນຍາຕ່ຳຕ້ອຍ ພ້ອມກັບຜູ້ນັ້ນ ໆເອງ ລວມຄວາມວ່າ ເຂົາກໍເປັນຜູ້ມີປັນຍາຊາມພ້ອມກັບຜູ້ນັ້ນ

ຄຳວ່າ ແລະຖ້າຜູ້ຮຽນຈົບພຣະເວດເອງເປັນນັກປາດໄດ້ແລ້ວ ອະທິບາຍວ່າ ແລະຖ້າຜູ້ຮຽນຈົບພຣະເວດເອງ ເປັນນັກປາດ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດແລ້ວ ລວມຄວາມວ່າ ແລະຖ້າຜູ້ຮຽນຈົບພຣະເວດເອງເປັນນັກປາດໄດ້ແລ້ວ

ຄຳວ່າ ບັນດາສະມະນະກໍບໍ່ມີໃຜເປັນຄົນພານ ອະທິບາຍວ່າ ບັນດາສະມະນະກໍບໍ່ມີໃຜເປັນຄົນພານ ຄື ເປັນຄົນຊົ່ວ ຊົ່ວຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍເລີຍ ທຸກຄົນກໍມີປັນຍາເລີດ ມີປັນຍາປະເສີດ ມີປັນຍາວິເສດ ມີປັນຍານຳໜ້າ ມີປັນຍາສູງສຸດ ມີປັນຍາປະເສີດສຸດໄປໝົດ ລວມຄວາມວ່າ ບັນດາສະມະນະກໍບໍ່ມີໃຜເປັນຄົນພານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ອັນໜຶ່ງ ຫາກບຸກຄົນເປັນຜູ້ຊົ່ວຊາມຍ້ອນວາຈາຂອງຜູ້ອື່ນແລ້ວ
ເຂົາກໍເປັນຜູ້ມີປັນຍາຊາມພ້ອມກັບຜູ້ນັ້ນ
ແລະຖ້າຜູ້ຮຽນຈົບພຣະເວດເອງເປັນນັກປາດໄດ້ແລ້ວ
ບັນດາສະມະນະກໍບໍ່ມີໃຜເປັນຄົນພານ

[໑໔໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຊົນເຫຼົ່າໃດກ່າວສັນເສີນທຳອື່ນນອກຈາກທຳນີ້
ຊົນເຫຼົ່ານັ້ນກໍພາດທາງແຫ່ງຄວາມມົດຈົດ ເປັນຜູ້ບໍ່ບໍລິບູນ
ເດຍຣະຖີພາກັນກ່າວທິດຖິຫຼາຍແມ່ນແນວນີ້
ຍ້ອນພວກເຂົາເປັນຜູ້ຍິນດີຍິ່ງ ດ້ວຍຄວາມຍິນດີໃນທິດຖິຂອງຕົນ

ຄຳວ່າ ຊົນເຫຼົ່າໃດກ່າວສັນເສີນທຳອື່ນນອກຈາກທຳນີ້ ຊົນເຫຼົ່ານັ້ນກໍພາດທາງແຫ່ງຄວາມມົດຈົດ ເປັນຜູ້ບໍ່ບໍລິບູນ ອະທິບາຍວ່າ ຊົນເຫຼົ່າໃດ ກ່າວສັນເສີນທຳ ຄື ທິດຖິ ປະຕິປະ

ທາມັກອື່ນນອກຈາກທຳນີ້ ຊົນເຫຼົ່ານັ້ນກໍພາດ ຄື ຜິດ ພັ້ງພາດທາງແຫ່ງຄວາມບໍລິສຸດ ຄື ທາງແຫ່ງຄວາມສະອາດ ທາງແຫ່ງຄວາມບໍລິສຸດ ທາງແຫ່ງຄວາມຜຸດຜ່ອງ ທາງແຫ່ງຄວາມຜ່ອງແຜ້ວ ຄື ພາດຈາກອະຣະຫັດຕະຜົນ ເປັນຜູ້ບໍ່ບໍລິບູນ ຄື ຊົນເຫຼົ່ານັ້ນບໍ່ພຽບພ້ອມ ບໍ່ບໍລິບູນໄດ້ແກ່ ເປັນຄົນຊົ່ວ ຊາມ ຕໍ່າຊາມ ໜ້າຣັງກຽດ ຫຍາບຊ້າ ຕໍ່າຕ້ອຍ ລວມຄວາມວ່າ ຊົນເຫຼົ່າໃດກ່າວສັນເສີນທຳອື່ນນອກຈາກທຳນີ້ ຊົນເຫຼົ່ານັ້ນກໍພາດທາງແຫ່ງຄວາມບໍລິສຸດ ເປັນຜູ້ບໍ່ບໍລິບູນທິດຖີຮຽກວ່າຕິດຖະ

ຄຳວ່າ ເດຍຣະຖີພາກັນກ່າວທິດຖິຫຼາຍແມ່ນແນວນີ້ ອະທິບາຍວ່າ ທິດຖິ ຕັດຮຽກວ່າຕິດຖະ (ທ່າ) ເຈົ້າທິດຖີ ຕັດຮຽກວ່າ ເດຍຣະຖີ ພວກເດຍຣະຖີພາກັນກ່າວ ຄື ເວົ້າບອກສະແດງ ຊີ້ແຈ່ງ ທິດຖິຫຼາຍ ລວມຄວາມວ່າ ເດຍຣະຖີພາກັນກ່າວທິດຖິຫຼາຍແມ່ນແນວນີ້

ຄຳວ່າ ຍ້ອນພວກເຂົາເປັນຜູ້ຍິນດີຍິ່ງ ດ້ວຍຄວາມຍິນດີໃນທິດຖິຂອງຕົນ ອະທິບາຍ ວ່າຍ້ອນພວກເຂົາຍິນດີ ຍິນດີຍິ່ງ ດ້ວຍຄວາມຍິນດີໃນທິດຖິຂອງຕົນ ລວມຄວາມວ່າ ຍ້ອນພວກເຂົາເປັນຜູ້ຍິນດີຍິ່ງ ດ້ວຍຄວາມຍິນດີໃນທິດຖິຂອງຕົນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຊົນເຫຼົ່າໃດກ່າວສັນເສີນທຳອື່ນນອກຈາກທຳນີ້
ຊົນເຫຼົ່ານັ້ນກໍພາດທາງແຫ່ງຄວາມບໍລິສຸດ ເປັນຜູ້ບໍ່ບໍລິບູນ
ເດຍຣະຖີພາກັນກ່າວທິດຖິຫຼາຍແມ່ນແນວນີ້
ຍ້ອນພວກເຂົາເປັນຜູ້ຍິນດີຍິ່ງ ດ້ວຍຄວາມຍິນດີໃນທິດຖິຂອງຕົນ

[໑໔໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພວກເດຍຣະຖີພາກັນກ່າວຄວາມບໍລິສຸດວ່າ
ມີຢູ່ໃນທຳນີ້ເທົ່ານັ້ນ ບໍ່ກ່າວຄວາມບໍລິສຸດໃນທຳເຫຼົ່າອື່ນ
ພວກເດຍຣະຖີຕັ້ງຢູ່ໃນທິດຖິຫຼາຍແມ່ນແນວນີ້
ຕ່າງກ່າວຢືນຢັນໃນທຳອັນເປັນແນວທາງຂອງຕົນນັ້ນ

## ວ່າດ້ວຍທິດຖິຂອງພວກເດຍຣະຖີ

ຄຳວ່າ ພວກເດຍຣະຖີພາກັນກ່າວຄວາມບໍລິສຸດວ່າມີຢູ່ໃນທຳນີ້ເທົ່ານັ້ນ ອະທິບາຍວ່າພວກເດຍຣະຖີພາກັນກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປໃນທຳນີ້ວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ

ພວກເດຍຣະຖີພາກັນກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປໃນທຳນີ້ວ່າ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ລວມຄວາມວ່າ ພວກເດຍຣະຖີພາກັນກ່າວຄວາມ ບໍລິສຸດວ່າມີຢູ່ໃນທຳນີ້ເທົ່ານັ້ນ

ຄຳວ່າ ບໍ່ກ່າວຄວາມບໍລິສຸດໃນທຳເຫຼົ່າອື່ນ ອະທິບາຍວ່າ ພວກເດຍຣະຖີ ເຫຼົ່ານັ້ນ ຍ່ອມຖິ້ມ ລະຖິ້ມ ປະຖິ້ມວາທະອື່ນທຸກຢ່າງ ນອກຈາກສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖີ ປະຕິປະທາ ມັກ ຂອງຕົນ ກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງແນວນີ້ວ່າ ສາດສະດານັ້ນບໍ່ແມ່ນສັບພັນຍູ ທຳບໍ່ແມ່ນສາດສະດາກ່າວສອນໄວ້ດີແລ້ວ ໝູ່ຄະນະບໍ່ແມ່ນຜູ້ປະຕິບັດດີແລ້ວ ທິດຖີບໍ່ແມ່ນສິ່ງທີ່ຈະເລີນ ປະຕິປະທາບໍ່ແມ່ນສາດສະດາບັນຍັດໄວ້ດີແລ້ວ ມັກ ບໍ່ແມ່ນທາງນຳສັດອອກຈາກທຸກ ໃນທຳນັ້ນບໍ່ມີຄວາມບໍລິສຸດ ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຫຼື ຄວາມຫຼຸດພົ້ນໄປ ຄື ໃນທຳນັ້ນ ສັດທັງຫຼາຍຍ່ອມບໍລິສຸດ ສະອາດບໍລິສຸດ ຫຼຸດໄປ ພົ້ນໄປ ຫຼື ຫຼຸດພົ້ນໄປບໍ່ໄດ້ ສັດທັງຫຼາຍເປັນ ຜູ້ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ລວມຄວາມວ່າ ບໍ່ກ່າວ ຄວາມບໍລິສຸດໃນທຳເຫຼົ່າອື່ນ

ຄຳວ່າ ພວກເດຍຣະຖີຕັ້ງຢູ່ໃນທິດຖີຫຼາຍແມ່ນແນວນີ້ ອະທິບາຍວ່າ ທິດຖີຕັດ ຮຽກວ່າ ຕິດຖະ ເຈົ້າທິດຖີຕັດຮຽກວ່າ ເດຍຣະຖີ ພວກເດຍຣະຖີຕັ້ງຢູ່ ຄື ຕັ້ງໝັ້ນ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອໃນທິດຖີຫຼາຍ ດ້ວຍທິດຖີຫຼາຍ ລວມຄວາມວ່າ ພວກເດຍຣະຖີ ຕັ້ງຢູ່ໃນທິດຖີຫຼາຍແມ່ນແນວນີ້

ຄຳວ່າ ຕ່າງກ່າວຢືນຢັນໃນທຳອັນເປັນແນວທາງຂອງຕົນນັ້ນ ອະທິບາຍວ່າ ທຳ ຊື່ວ່າແນວທາງຂອງຕົນ ທິດຖີ ຊື່ວ່າແນວທາງຂອງຕົນ ປະຕິປະທາ ຊື່ວ່າແນວທາງຂອງຕົນ ມັກ ກໍຊື່ວ່າແນວທາງຂອງຕົນ ພວກເດຍຣະຖີກ່າວຢືນຢັນ ຄື ກ່າວໝັ້ນຄົງ ກ່າວແຂງຂັນ ກ່າວ ໜັກແໜ້ນໃນແນວທາງຂອງຕົນ ລວມຄວາມວ່າ ຕ່າງກ່າວຢືນຢັນໃນທຳອັນເປັນແນວທາງຂອງຕົນນັ້ນດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພວກເດຍຣະຖີພາກັນກ່າວຄວາມບໍລິສຸດວ່າ<br>
ມີຢູ່ໃນທຳນີ້ເທົ່ານັ້ນ ບໍ່ກ່າວຄວາມບໍລິສຸດໃນທຳເຫຼົ່າອື່ນ<br>
ພວກເດຍຣະຖີຕັ້ງຢູ່ໃນທິດຖີຫຼາຍແມ່ນແນວນີ້<br>
ຕ່າງກ່າວຢືນຢັນໃນທຳອັນເປັນແນວທາງຂອງຕົນນັ້ນ

[໑໘໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ອັນໜຶ່ງ ເຈົ້າລັດທິກ່າວຢືນຢັນໃນແນວທາງຂອງຕົນ
ໃສ່ໄຟຜູ້ອື່ນວ່າ ເປັນຄົນພານ ຍ້ອນທິດຖິນີ້
ເຈົ້າລັດທິນັ້ນກ່າວເຖິງຜູ້ອື່ນວ່າ ເປັນຄົນພານ
ມີຄວາມບໍ່ມົດຈົດເປັນທຳມະດາ
ເພິ່ງນຳຄວາມມຸ້ງຮ້າຍມາເອງຢ່າງແນ່ນອນ

ຄຳວ່າ ອັນໜຶ່ງ ເຈົ້າລັດທິກ່າວຢືນຢັນໃນແນວທາງຂອງຕົນ ອະທິບາຍວ່າ ທຳ ຊື່ວ່າແນວທາງຂອງຕົນ ທິດຖິ ຊື່ວ່າແນວທາງຂອງຕົນ ປະຕິປະທາ ຊື່ວ່າແນວທາງຂອງຕົນ ມັກ ກໍຊື່ວ່າແນວທາງຂອງຕົນ ເຈົ້າລັດທິ ກ່າວຢືນຢັນ ຄື ກ່າວໝັ້ນຄົງ ກ່າວແຂງຂັນ ກ່າວໜັກແໜ້ນໃນແນວທາງຂອງຕົນ ລວມຄວາມວ່າ ອັນໜຶ່ງ ເຈົ້າລັດທິກ່າວຢືນຢັນໃນແນວທາງຂອງຕົນ

ຄຳວ່າ ຍ້ອນທິດຖິນີ້ ໃນຄຳວ່າ ໃສ່ໄຟໃຜອື່ນວ່າ ເປັນຄົນພານ ຍ້ອນທິດຖິນີ້ ອະທິບາຍວ່າ ເພິ່ງໃສ່ໄຟ ຄື ເຫັນ ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງບຸກຄົນອື່ນໂດຍຄວາມເປັນຄົນພານ ຄື ເປັນຄົນຊົ່ວ ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ຍ້ອນທິດຖິຂອງຕົນ ຄື ຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ ລວມຄວາມວ່າ ໃສ່ໄຟໃຜອື່ນວ່າ ເປັນຄົນພານ ຍ້ອນທິດຖິນີ້

ຄຳວ່າ ເຈົ້າລັດທິນັ້ນກ່າວເຖິງຜູ້ອື່ນວ່າ ເປັນຄົນພານ ມີຄວາມບໍ່ມົດຈົດເປັນທຳມະດາ ເພິ່ງນຳຄວາມມຸ້ງຮ້າຍມາເອງຢ່າງແນ່ນອນ ອະທິບາຍວ່າ ເຈົ້າລັດທິນັ້ນ ກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ແນວນີ້ວ່າ ຜູ້ອື່ນ ເປັນຄົນພານ ຄື ເປັນຄົນຊົ່ວ ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ ມີຄວາມບໍ່ມົດຈົດເປັນທຳມະດາ ຄື ມີຄວາມບໍ່ສະອາດເປັນທຳມະດາ ມີຄວາມບໍ່ບໍລິສຸດເປັນທຳມະດາ ມີຄວາມບໍ່ຜ່ອງແຜ້ວເປັນທຳມະດາ ເພິ່ງນຳ ຄື ນຳມາພ້ອມ ຖືມາ ຖືມາພ້ອມ ດຶງມາ ດຶງມາພ້ອມ ຖື ຍຶດໝັ້ນ ຖືໝັ້ນການຜິດຖຽງ ການໝາງໃຈ ການຍາດແຍ່ງ ການວິວາດ ການມຸ້ງຮ້າຍມາເອງຢ່າງແນ່ນອນ ລວມຄວາມວ່າ ເຈົ້າລັດທິນັ້ນກ່າວເຖິງຜູ້ອື່ນວ່າ ເປັນຄົນພານ ມີຄວາມບໍ່ມົດຈົດເປັນທຳມະດາ ເພິ່ງນຳຄວາມມຸ້ງຮ້າຍມາເອງ ຢ່າງແນ່ນອນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ອັນໜຶ່ງ ເຈົ້າລັດທິກ່າວຢືນຢັນໃນແນວທາງຂອງຕົນ
ໃສ່ໄຟໃຜອື່ນວ່າ ເປັນຄົນພານ ຍ້ອນທິດຖິນີ້
ເຈົ້າລັດທິນັ້ນກ່າວເຖິງຜູ້ອື່ນວ່າ ເປັນຄົນພານ
ມີຄວາມບໍ່ມົດຈົດເປັນທຳມະດາ
ເພິ່ງນຳຄວາມມຸ້ງຮ້າຍມາເອງຢ່າງແນ່ນອນ

[໑໔໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຈົ້າລັດທິນັ້ນຕັ້ງຢູ່ໃນທິດຖິທີ່ຕົກລົງໃຈແລະນັບຖືເອງແລ້ວ
ກໍເຖິງການວິວາດໃນການຂ້າງໜ້າໃນໂລກ
ຄົນທີ່ເກີດມາລະທິດຖິທີ່ຕົກລົງໃຈທັງມວນໄດ້
ຍ່ອມບໍ່ກໍ່ການມຸ້ງຮ້າຍໃນໂລກ

ຄຳວ່າ ເຈົ້າລັດທິນັ້ນຕັ້ງຢູ່ໃນທິດຖິທີ່ຕົກລົງໃຈແລະນັບຖືເອງແລ້ວ ອະທິບາຍວ່າ ທິດຖິ ໖໔ ຕັດຮຽກວ່າ ທິດຖິທີ່ຕົກລົງໃຈ ເຈົ້າລັດທິຕັ້ງຢູ່ ຄື ຕັ້ງໝັ້ນ ຖື ຢຶດໝັ້ນ ຖືໝັ້ນໃນທິດຖິທີ່ຕົກລົງໃຈ ລວມຄວາມວ່າ ເຈົ້າລັດທິນັ້ນຕັ້ງຢູ່ໃນທິດຖິທີ່ຕົກລົງໃຈ

ຄຳວ່າ ນັບຖືເອງ ອະທິບາຍວ່າ ນັບຖື ຄື ນອບນ້ອມເອງວ່າ ສາດສະດານີ້ ເປັນສັບພັນຍູ ໄດ້ແກ່ ນັບຖື ຄື ນອບນ້ອມເອງວ່າ ທຳນີ້ສາດສະດາກ່າວສອນໄວ້ດີແລ້ວ ฯລฯ ໝູ່ຄະນະນີ້ເປັນຜູ້ປະຕິບັດດີແລ້ວ ฯລฯ ທິດຖິນີ້ເປັນສິ່ງທີ່ຈະເລີນ ฯລฯ ປະຕິປະທານີ້ສາດສະດາບັນຍັດໄວ້ດີແລ້ວ ฯລฯ ມັກ ນີ້ເປັນທາງນຳສັດອອກຈາກທຸກ ລວມຄວາມວ່າ ເຈົ້າລັດທິນັ້ນດຳຣົງຢູ່ໃນທິດຖິທີ່ຕົກລົງໃຈແລະນັບຖືເອງແລ້ວ

ຄຳວ່າ ກໍເຖິງການວິວາດໃນການຂ້າງໜ້າໃນໂລກ ອະທິບາຍວ່າ ອະນາຄົດ ຕັດຮຽກວ່າ ການຂ້າງໜ້າ ເຈົ້າລັດທິນັ້ນວາງວາທະຂອງຕົນໄວ້ຂ້າງໜ້າ ກໍເຖິງ ຄື ເຂົ້າເຖິງ ເຂົ້າໄປເຖິງ ຖືຢຶດໝັ້ນ ຖືໝັ້ນການຜິດຖຽງ ການໝາງໃຈ ການຍາດແຍ່ງ ການວິວາດ ການມຸ້ງຮ້າຍ ເອງຢ່າງແນ່ນອນ ລວມຄວາມວ່າ ກໍເຖິງການວິວາດໃນການຂ້າງໜ້າໃນໂລກແນວນີ້ແດ່

ອີກໄນໜຶ່ງ ເຈົ້າລັດທິນັ້ນຍ່ອມກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການຍາດແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍກັບວາທະອື່ນຂ້າງໜ້າວ່າ ທ່ານບໍ່ຮູ້ທຳວິໄນນີ້ ฯລฯ ຫຼື ຫາກທ່ານສາມາດກໍຈົ່ງແກ້ໄຂເທີ້ນ ລວມຄວາມວ່າ ກໍເຖິງການວິວາດໃນການຂ້າງໜ້າໃນໂລກ ແນວນີ້ແດ່

ຄຳວ່າ ລະທິດຖິທີ່ຕົກລົງໃຈທັງມວນໄດ້ ອະທິບາຍວ່າ ທິດຖິ ໖໔ ຕັດຮຽກວ່າ ທິດຖິທີ່ຕົກລົງໃຈ ເຈົ້າລັດທິ ລະ ຄື ສະລະ ສະລະຂາດ ເວັ້ນ ລະເວັ້ນ ບັນເທົາ ເຮັດໃຫ້ໝົດສິ້ນໄປໃຫ້ເຖິງຄວາມບໍ່ມີອີກເຊິ່ງທິດຖິທີ່ຕົກລົງໃຈທຸກຢ່າງ ຈາກຄວາມຕົກລົງໃຈດ້ວຍອຳນາດທິດຖິ ລວມຄວາມວ່າ ລະທິດຖິທີ່ຕົກລົງໃຈທັງມວນໄດ້

ຄຳວ່າ ຄົນທີ່ເກີດມາ ฯລฯ ຍ່ອມບໍ່ກໍ່ການມຸ້ງຮ້າຍໃນໂລກ ອະທິບາຍວ່າ ບໍ່ກໍ່ການຜິດຖຽງ ບໍ່ກໍ່ການໝາງໃຈ ບໍ່ກໍ່ການຍາດແຍ່ງ ບໍ່ກໍ່ການວິວາດ ບໍ່ກໍ່ການມຸ້ງຮ້າຍ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ອັກຄິເວສະນະ ພິກຂຸຜູ້ມີຈິດຫຼຸດພົ້ນແລ້ວແນວນີ້ແລ ຍ່ອມບໍ່ໂຕ້ຖຽງກັບໃຜ ບໍ່ວິວາດກັບໃຜ ຍ່ອມຊີ້ແຈ່ງ ບໍ່ຖືໝັ້ນສິ່ງທີ່ກ່າວກັນໃນໂລກເລື້ອງໃດ ທີ່ເວົ້າກັນໃນໂລກ ທ່ານກໍບໍ່ຢຶດໝັ້ນຊີ້ແຈ່ງດ້ວຍເລື້ອງນັ້ນ

ຄຳວ່າ ຄົນທີ່ເກີດມາ ໄດ້ແກ່ສັດ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ຄົນທີ່ເກີດມາ ໆລໆ ຍ່ອມບໍ່ກໍ່ການມຸ້ງຮ້າຍໃນໂລກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຈົ້າລັດທິນັ້ນຕັ້ງຢູ່ໃນທິດຖິທີ່ຕົກລົງໃຈແລະນັບຖືເອງແລ້ວ
ກໍເຖິງການວິວາດໃນການຂ້າງໜ້າໃນໂລກ
ຄົນທີ່ເກີດມາລະທິດຖິທີ່ຕົກລົງໃຈທັງມວນໄດ້
ຍ່ອມບໍ່ກໍ່ການມຸ້ງຮ້າຍໃນໂລກ

**ຈູລະວິຍູຫະສຸດຕະນິດເທດທີ ໑໘ ຈົບ**

# ໑໓. ມະຫາວິຍູຫະສຸດຕະນິດເທດ

## ອະທິບາຍມະຫາວິຍູຫະສູດ

## ວ່າດ້ວຍການວິວາດກັນຍ້ອນທິດຖິສູດໃຫຍ່

ພຣະສາຣີບຸດເຖຣະຈະກ່າວອະທິບາຍມະຫາວິຍູຫະສູດ ດັ່ງຕໍ່ໄປນີ້

[໑໓໐] (ພຣະພຸດທະເນຣະມິດທູນຖາມວ່າ)

ສະມະນະພາມພວກໃດພວກໜຶ່ງເຫຼົ່ານີ້
ຍຶດຖືທິດຖິຢູ່ ພາກັນກ່າວອ້າງວ່າ ນີ້ເທົ່ານັ້ນຈິງ
ສະມະນະພາມເຫຼົ່ານັ້ນທຸກພວກນັ້ນຈະຖືກນິນທາ
ຫຼືວ່າຈະໄດ້ຄວາມສັນເສີນຍ້ອນທິດຖິນັ້ນ

ຄຳວ່າ ພວກໃດພວກໜຶ່ງ ໃນຄຳວ່າ ສະມະນະພາມພວກໃດພວກໜຶ່ງເຫຼົ່ານີ້ ຍຶດຖືທິດຖິຢູ່ ໄດ້ແກ່ ທຸກພວກໂດຍອາການທັງໝົດ ທຸກພວກບໍ່ເຫຼືອ ບໍ່ມີສ່ວນເຫຼືອ ໂດຍປະການທັງປວງ ຄຳວ່າ ພວກໃດພວກໜຶ່ງ ນີ້ ເປັນຄຳກ່າວລວມໄວ້ທັງໝົດ

ຄຳວ່າ ຢຶດຖືທິດຖິຢູ່ ອະທິບາຍວ່າ ສະມະນະພາມເຈົ້າລັດທິບາງພວກ ສະມະນະພາມເຫຼົ່ານັ້ນ ຢຶດ ຢຶດຖື ຖື ຢຶດໝັ້ນ ຖືໝັ້ນທິດຖິແນວໃດແນວໜຶ່ງບັນດາທິດຖິ ໖໒ ແລ້ວ ຢູ່ ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງໃນທິດຖິຂອງຕົນ ໆ ເໝືອນພວກຄະລິຫັດຜູ້ຄອງເຮືອນກໍຢູ່ໃນເຮືອນ ໝູ່ພິກຂຸຜູ້ມີອາບັດກໍຢູ່ໃນອາບັດ ຫຼື ພວກປຸຖຸຊົນຜູ້ມີກິເລດກໍຢູ່ໃນກິເລດ ສັນໃດ ສະມະນະ ພາມເຈົ້າລັດທິບາງພວກ ສະມະນະພາມເຈົ້າລັດທິເຫຼົ່ານັ້ນ ຢຶດ ຢຶດຖື ຖື ຢຶດໝັ້ນ ຖືໝັ້ນທິດຖິແນວໃດແນວໜຶ່ງບັນດາທິດຖິ ໖໒ ແລ້ວ ຢູ່ ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງໃນທິດຖິຂອງຕົນສັນນັ້ນຄືກັນ ລວມຄວາມວ່າ ສະມະນະພາມພວກໃດພວກໜຶ່ງເຫຼົ່ານີ້ ຢຶດຖືທິດຖິຢູ່

ຄຳວ່າ ພາກັນກ່າວອ້າງວ່າ ນີ້ເທົ່ານັ້ນຈິງ ອະທິບາຍວ່າ ກ່າວ ຄື ເວົ້າ ບອກ ສະແດງຊີ້ແຈ່ງວ່າ "ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ" ກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງວ່າ "ໂລກບໍ່ທ່ຽງ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ" ລວມຄວາມວ່າ ພາກັນກ່າວອ້າງວ່າ ນີ້ເທົ່າ ນັ້ນຈິງ

ຄຳວ່າ ສະມະນະພາມເຫຼົ່ານັ້ນທຸກພວກນັ້ນແລຈະຖືກນິນທາ ອະທິບາຍວ່າ ສະມະນະພາມເຫຼົ່ານັ້ນທຸກພວກນັ້ນແລ ຈະໄດ້ຮັບການນິນທາ ຄື ໄດ້ຮັບການຕິຕຽນໄດ້ຮັບຄວາມເສື່ອມກຽດ ໄດ້ແກ່ ທຸກພວກຈະຖືກນິນທາ ຈະຖືກຕິຕຽນ ຈະຖືກເຮັດໃຫ້ເສື່ອມກຽດ ລວມຄວາມວ່າ ສະມະນະພາມເຫຼົ່ານັ້ນທຸກພວກນັ້ນແລຈະຖືກນິນທາ

ຄຳວ່າ ຫຼືວ່າ ຈະໄດ້ຄວາມສັນເສີນຍ້ອນທິດຖິນັ້ນ ອະທິບາຍວ່າ ຈະໄດ້ ຄື ຈະໄດ້ຮັບ ສົມຫວັງ ປະສົບຄວາມສັນເສີນ ຄື ຄວາມຊື່ນຊົມ ກຽດຕິຄຸນ ຄວາມຍ້ອງຍໍຍ້ອນທິດຖິຂອງຕົນ ຄື ໃນຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນນັ້ນ

ລວມຄວາມວ່າ ຫຼື ວ່າ ຈະໄດ້ຄວາມສັນເສີນຍ້ອນທິດຖິນັ້ນ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມ ວ່າ

ສະມະນະພາມພວກໃດພວກໜຶ່ງເຫຼົ່ານີ້
ຢຶດຖືທິດຖິຢູ່ ພາກັນກ່າວອ້າງວ່າ ນີ້ເທົ່ານັ້ນຈິງ
ສະມະນະພາມເຫຼົ່ານັ້ນທຸກພວກນັ້ນແລຈະຖືກນິນທາ
ຫຼືວ່າ ຈະໄດ້ຄວາມສັນເສີນຍ້ອນທິດຖິນັ້ນ

[໑໓໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຜົນແຫ່ງວາທະນີ້ໜ້ອຍຫຼາຍ ບໍ່ພໍເພື່ອຄວາມສະຫງົບ
ເຮົາກ່າວຜົນແຫ່ງການວິວາດເປັນ ໒ ຢ່າງ
ບຸກຄົນເຫັນໂທດແມ່ນນີ້ແລ້ວ
ເບິ່ງເຫັນພູມ (ເຫດ) ແຫ່ງການບໍ່ວິວາດວ່າ ກະເສມ ບໍ່ເພິ່ງວິວາດກັນ

ຄຳວ່າ ຜົນແຫ່ງວາທະນີ້ໜ້ອຍຫຼາຍ ໃນຄຳວ່າ ຜົນແຫ່ງວາທະນີ້ໜ້ອຍຫຼາຍ ບໍ່ພໍເພື່ອຄວາມສະງົບ ໄດ້ແກ່ ຜົນນີ້ໜ້ອຍ ຄື ຜົນນີ້ຕ່ຳຊາມ ໜ່ອຍດຽວ ໜ້າຮັງກຽດ ຫຍາບຊ້າຕ່ຳຕ້ອຍ ລວມຄວາມວ່າ ຜົນແຫ່ງວາທະນີ້ໜ້ອຍຫຼາຍ

ຄຳວ່າ ບໍ່ພໍເພື່ອຄວາມສະງົບ ອະທິບາຍວ່າ ບໍ່ພໍເພື່ອຄວາມສະງົບຣາຄະ ເພື່ອຄວາມສະງົບໂທສະ ເພື່ອຄວາມສະງົບໂມຫະ ບໍ່ພໍເພື່ອຄວາມສະງົບ ຄື ເພື່ອເຂົ້າໄປສະງົບ ເພື່ອສະງົບເຢັນ ເພື່ອຄວາມດັບ ເພື່ອຄວາມສະລັດຖິ້ມ ເພື່ອຄວາມສະງົບຣະງັບໂກທະ ฯລฯ ອຸປານະ ฯລฯ ມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖໍາພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯ ຄວາມຮ້ອນຮົນທຸກສະຖານ ฯລฯ ຄວາມເດືອດຮ້ອນທຸກປະການບໍ່ພໍເພື່ອຄວາມສະງົບ ຄື ເພື່ອເຂົ້າໄປສະງົບ ເພື່ອສະງົບເຢັນ ເພື່ອຄວາມດັບ ເພື່ອຄວາມສະລັດຖິ້ມ ເພື່ອຄວາມສະງົບຣະງັບອະກຸສະລາພິສັງຂານທຸກປະເພດລວມຄວາມວ່າ ຜົນແຫ່ງວາທະນີ້ໜ້ອຍຫຼາຍ ບໍ່ພໍເພື່ອຄວາມສະງົບ

## ວ່າດ້ວຍຜົນແຫ່ງການວິວາດ ໘ ຢ່າງ

ຄຳວ່າ ເຮົາກ່າວຜົນແຫ່ງການວິວາດເປັນ ໘ ຢ່າງ ອະທິບາຍວ່າ ຜົນແຫ່ງການຜິດຖຽງຍ້ອນທິດຖິ ການໝາງໃຈຍ້ອນທິດຖິ ການຍາດແຍ່ງຍ້ອນທິດຖິ ການວິວາດຍ້ອນທິດຖິ ການມຸ້ງຮ້າຍຍ້ອນທິດຖິ ມີ ໘ ຢ່າງ ຄື ຊະນະກັບພ່າຍແພ້ ມີລາບກັບເສື່ອມລາບ ມີຍົດກັບເສື່ອມຍົດ ນິນທາກັບສັນເສີນ ສຸກກັບທຸກ ໂສມະນັດກັບໂທມະນັດ ອາລົມທີ່ເພິ່ງປາຖະໜາກັບບໍ່ເພິ່ງປາຖະໜາ ຄວາມມັກກັບຄວາມຊັງ ຄວາມເຟື່ອງຟູກັບຄວາມແຟບລົງ ຄວາມຍິນດີກັບຄວາມຍິນຮ້າຍ

ອີກໄນໜຶ່ງ ເຮົາກ່າວ ຄື ເວົ້າ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກເຮັດໃຫ້ງ່າຍ ປະກາດວ່າ ກຳນັ້ນເປັນໄປເພື່ອນະຣົກ ເປັນໄປເພື່ອກຳເນີດເດຍຣັດສານ ເປັນໄປເພື່ອເຜດວິໄສ ລວມຄວາມວ່າ ເຮົາກ່າວຜົນແຫ່ງການວິວາດເປັນ ໘ ຢ່າງ

ຄຳວ່າ ເຫັນໂທດແມ່ນນີ້ແລ້ວ ໃນຄຳວ່າ ບຸກຄົນເຫັນໂທດແມ່ນນີ້ແລ້ວ ฯລฯ ບໍ່ເພິ່ງວິວາດກັນ ອະທິບາຍວ່າ ເຫັນແລ້ວ ຄື ແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງແຈ້ງເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງໂທດນີ້ ຍ້ອນເຫດແຫ່ງການຜິດຖຽງກັນດ້ວຍອຳນາດທິດຖິ ການໝາງໃຈກັນດ້ວຍອຳນາດທິດຖິ ການຍາດແຍ່ງກັນດ້ວຍອຳນາດທິດຖິ ການວິວາດກັນດ້ວຍອຳນາດທິດຖິ ການມຸ້ງຮ້າຍກັນດ້ວຍອຳນາດທິດຖິ ລວມຄວາມວ່າ ເຫັນໂທດແມ່ນນີ້ແລ້ວ

ຄຳວ່າ ບໍ່ເພິ່ງວິວາດກັນ ອະທິບາຍວ່າ ບໍ່ເພິ່ງກໍ່ການຜິດຖຽງ ບໍ່ເພິ່ງກໍ່ການໝາງໃຈບໍ່ເພິ່ງກໍ່ການຍາດແຍ່ງ ບໍ່ເພິ່ງກໍ່ການວິວາດ ບໍ່ເພິ່ງກໍ່ການມຸ້ງຮ້າຍ ຄື ເພິ່ງລະ ບັນເທົາເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການຜິດຖຽງ ການໝາງໃຈ ການຍາດແຍ່ງການວິວາດ ການມຸ້ງ

ຮ້າຍ ໄດ້ແກ່ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບການຜິດຖຽງ ການໝາງໃຈ ການຍາດແຍ່ງ ການວິວາດ ແລະການມຸ້ງຮ້າຍ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບຸກຄົນເຫັນໂທດແມ່ນນີ້ແລ້ວ ຯລຯ ບໍ່ເພິ່ງວິວາດກັນ

ຄຳວ່າ ເບິ່ງເຫັນພູມ (ເຫດ) ແຫ່ງການບໍ່ວິວາດວ່າ ກະເສມ ອະທິບາຍວ່າ ອະມະຕະນິບພານຕັດຮຽກວ່າ ພູມແຫ່ງການບໍ່ວິວາດ ໄດ້ແກ່ ທຳເປັນທີ່ສະງົບສັງຂານທັງປວງ ເປັນທີ່ສະລັດຖິ້ມ ອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ບຸກຄົນແນມເຫັນ ຄື ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາເຫັນພູມແຫ່ງການບໍ່ວິວາດນີ້ ໂດຍຄວາມເປັນທຳອັນກະເສມ ຄື ໂດຍຄວາມເປັນທຳເຄື່ອງປ້ອງກັນເປັນທີ່ຫຼົບຫຼີກເປັນທີ່ເພິ່ງ ເປັນທີ່ບໍ່ມີໄພ ເປັນທີ່ບໍ່ຈຸຕິ ເປັນອະມະຕະທຳ ເປັນນິບພານ ລວມຄວາມວ່າ ເບິ່ງເຫັນພູມ (ເຫດ) ແຫ່ງການບໍ່ວິວາດວ່າ ກະເສມ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ຜົນແຫ່ງວາທະນີ້ໜ້ອຍຫຼາຍ ບໍ່ພໍເພື່ອຄວາມສະງົບ
ເຮົາກ່າວຜົນແຫ່ງການວິວາດເປັນ ໒ ຢ່າງ
ບຸກຄົນເຫັນໂທດແມ່ນນີ້ແລ້ວ
ເບິ່ງເຫັນພູມ (ເຫດ) ແຫ່ງການບໍ່ວິວາດວ່າ ກະເສມ ບໍ່ເພິ່ງວິວາດກັນ

[໑໓໒] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ທິດຖິສົມມຸດເຫຼົ່ານີ້ແນວໃດແນວໜຶ່ງເກີດຈາກປຸຖຸຊົນ
ບຸກຄົນຜູ້ມີຄວາມຮູ້ຍ່ອມບໍ່ເຂົ້າເຖິງທິດຖິສົມມຸດເຫຼົ່ານີ້ທຸກຢ່າງ
ບຸກຄົນຜູ້ບໍ່ມີກິເລດເປັນເຫດເຂົ້າເຖິງນັ້ນ ບໍ່ເຮັດຄວາມພໍໃຈໃນຮູບທີ່ເຫັນ
ສຽງທີ່ໄດ້ຍິນ ເພິ່ງເຖິງສິ່ງທີ່ຄວນເຂົ້າເຖິງອັນໃດນໍ?

ຄຳວ່າ ແນວໃດແນວໜຶ່ງ ໃນຄຳວ່າ ທິດຖິສົມມຸດເຫຼົ່ານີ້ແນວໃດແນວໜຶ່ງເກີດ ຈາກ ປຸຖຸຊົນ ໄດ້ແກ່ ທຸກຢ່າງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ແນວໃດແນວໜຶ່ງ ນີ້ເປັນຄຳກ່າວລວມໄວ້ທັງໝົດ

ຄຳວ່າ ທິດຖິສົມມຸດ ອະທິບາຍວ່າ ທິດຖິ ໖໒ ຕັດຮຽກວ່າ ສົມມຸດ ຈຶ່ງຊື່ວ່າ ທິດຖິສົມມຸດ

ຄຳວ່າ ເກີດຈາກປຸຖຸຊົນ ອະທິບາຍວ່າ ທິດຖິສົມມຸດເຫຼົ່ານັ້ນ ເກີດຈາກປຸຖຸຊົນ ຈຶ່ງຊື່ວ່າເກີດຈາກປຸຖຸຊົນ ຫຼື ທິດຖິສົມມຸດເຫຼົ່ານີ້ເກີດຈາກຊົນຕ່າງ ໆ ຫຼາກຫຼາຍ ຈຶ່ງຊື່ວ່າເກີດຈາກ ປຸຖຸຊົນ ລວມຄວາມວ່າ ທິດຖິສົມມຸດເຫຼົ່ານີ້ແນວໃດແນວໜຶ່ງເກີດຈາກປຸຖຸຊົນ

ຄຳວ່າ ບຸກຄົນຜູ້ມີຄວາມຮູ້ ຍ່ອມບໍ່ເຂົ້າເຖິງທິດຖິສົມມຸດເຫຼົ່ານີ້ທຸກຢ່າງ ອະທິບາຍວ່າບຸກຄົນຜູ້ມີຄວາມຮູ້ ຄື ມີວິດຊາ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ຍ່ອມບໍ່

ເຖິງ ບໍ່ເຂົ້າເຖິງ ຄື ບໍ່ເຂົ້າໄປເຖິງ ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນ ທິດຖິສົມມຸດເຫຼົ່ານີ້ທຸກຢ່າງ ລວມຄວາມວ່າ ບຸກຄົນຜູ້ມີຄວາມຮູ້ ຍ່ອມບໍ່ເຂົ້າເຖິງທິດຖິສົມມຸດເຫຼົ່ານີ້ທຸກຢ່າງວ່າ ດ້ວຍກິເລດເປັນເຫດເຂົ້າເຖິງ ໒ ຢ່າງ

ຄຳວ່າ ກິເລດເປັນເຫດເຂົ້າເຖິງ ໃນຄຳວ່າ ບຸກຄົນຜູ້ບໍ່ມີກິເລດເປັນເຫດເຂົ້າເຖິງນັ້ນ ຯລຯ ເພິ່ງເຖິງສິ່ງທີ່ຄວນເຂົ້າເຖິງອັນໃດນໍ? ອະທິບາຍວ່າ ກິເລດເປັນເຫດເຂົ້າເຖິງ ໒ ຢ່າງ ຄື

(໑) ກິເລດເປັນເຫດເຂົ້າເຖິງດ້ວຍອຳນາດຕັນຫາ
(໒) ກິເລດເປັນເຫດເຂົ້າເຖິງດ້ວຍອຳນາດທິດຖິ ຯລຯ

ນີ້ຊື່ວ່າກິເລດເປັນເຫດເຂົ້າເຖິງດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າກິເລດເປັນເຫດເຂົ້າເຖິງ ດ້ວຍອຳນາດທິດຖິບຸກຄົນນັ້ນລະກິເລດເປັນເຫດເຂົ້າເຖິງດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມກິເລດເປັນເຫດເຂົ້າເຖິງດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະກິເລດເປັນເຫດເຂົ້າເຖິງດ້ວຍອຳນາດ ຕັນຫາ ສະລັດຖິ້ມກິເລດເປັນເຫດເຂົ້າເຖິງດ້ວຍອຳນາດທິດຖິໄດ້ແລ້ວ ບຸກຄົນຈຶ່ງຊື່ວ່າບໍ່ມີກິເລດເປັນເຫດເຂົ້າເຖິງ ເພິ່ງເຂົ້າເຖິງ ຄື ເຂົ້າໄປເຖິງ ຖື ຍຶດໝັ້ນ ຖືໝັ້ນ ຮູບອັນໃດນໍ? ວ່າ "ອັດຕາຂອງເຮົາ" ຯລຯ ເວທະນາອັນໃດນໍ? ຯລຯ ສັນຍາອັນໃດນໍ? ຯລຯ ສັງຂານອັນໃດນໍ? ຯລຯ ຄະຕິອັນໃດນໍ? ຯລຯການເຂົ້າເຖິງກຳເນີດອັນໃດນໍ? ຯລຯ ປະຕິສົນທິອັນໃດນໍ? ຯລຯ ພົບອັນໃດນໍ? ຯລຯ ສົງສານອັນໃດນໍ?" ເພິ່ງເຂົ້າເຖິງ ຄື ເຂົ້າໄປເຖິງ ຖື ຍຶດໝັ້ນ ຖືໝັ້ນ ວັດຕະອັນໃດນໍ? ວ່າຈະເປັນ "ວັດຕະຂອງເຮົາ" ລວມຄວາມວ່າ ຜູ້ບໍ່ມີກິເລດເປັນເຫດເຂົ້າເຖິງນັ້ນ ຯລຯ ເພິ່ງເຖິງສິ່ງທີ່ຄວນເຂົ້າເຖິງອັນໃດນໍ?

ຄຳວ່າ ບໍ່ເຮັດຄວາມພໍໃຈໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ອະທິບາຍວ່າ ບໍ່ເຮັດຄວາມພໍໃຈ ຄື ບໍ່ເຮັດສັນທະ ບໍ່ເຮັດຄວາມຮັກ ບໍ່ເຮັດຄວາມກຳໜັດ ໄດ້ແກ່ ບໍ່ໃຫ້ຄວາມພໍໃຈເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນໃນຮູບທີ່ເຫັນ ຫຼື ຄວາມມົດຈົດຍ້ອນຮູບທີ່ເຫັນ ໃນສຽງທີ່ໄດ້ຍິນ ຫຼື ຄວາມມົດຈົດຍ້ອນສຽງທີ່ໄດ້ຍິນ ໃນອາລົມທີ່ຮັບຮູ້ ຫຼື ຄວາມມົດຈົດຍ້ອນອາລົມທີ່ຮັບຮູ້ ລວມຄວາມວ່າ ບໍ່ເຮັດຄວາມພໍໃຈໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ທິດຖິສົມມຸດເຫຼົ່ານີ້ແນວໃດແນວໜຶ່ງເກີດຈາກປຸຖຸຊົນ
ບຸກຄົນຜູ້ມີຄວາມຮູ້ຍ່ອມບໍ່ເຂົ້າເຖິງທິດຖິສົມມຸດເຫຼົ່ານີ້ທຸກຢ່າງ
ບຸກຄົນຜູ້ບໍ່ມີກິເລດເປັນເຫດເຂົ້າເຖິງນັ້ນ ບໍ່ເຮັດຄວາມພໍໃຈໃນຮູບທີ່ເຫັນ
ສຽງທີ່ໄດ້ຍິນ ເພິ່ງເຖິງສິ່ງທີ່ຄວນເຂົ້າເຖິງອັນໃດນໍ?

[໑໓໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

สะมะนะพามผู้กล่าวอ้างสีนว่าสูงสุด
สะมาทานข้ออัดแล้ว ดำรงอยู่
ได้กล่าวความมีดจิดด้วยความสังลวมว่า
พวกเราสึกสาในทิดถินี้แลและสึกสาความมีดจิดแห่งข้ออัดนั้น
สะมะนะพามเหล่านั้นกล่าวอ้างตนว่าเป็นคนสะหลาด
ย่อมเป็นผู้ถึกนำเข้าสู่พิบ

## ว่าด้วยผู้มีกุสินเถิงพ้อมปะกอบด้วยทำ ๔ ปะการ

คำว่า สะมะนะพามผู้กล่าวอ้างสีนว่าสูงสุด ฯลฯ ได้กล่าวความมีดจิดด้วยความสังลวม อะทิบายว่า สะมะนะพามบางพวกกล่าวอ้างสีนว่าสูงสุด สะมะนะพามเหล่านั้นได้กล่าว คือ ย่อมกล่าว เว้า บอก สะแดง ชี้แจ่งความมีดจิด คือ ความสะอาด ความบໍลิสุด ความหลุดไป ความพົ້ນໄປ ความหลุดພົ້ນໄປ เพียงด้วยสีนเพียงด้วยความสังลวม เพียงด้วยความสังวอน เพียงด้วยความบ่ล่วงละเมิด

ปຽບເໝືອນປະຣິພາຊົກຜູ້ເປັນບຸດແຫ່ງນາງປະຣິພາຊິກາຊື່ສະມະນະມຸນທິກາ ກ່າວໄວ້ແນວນີ້ວ່າ "ຊ່າງໄມ້ເອີຍ ເຮົາບັນຍັດບຸຣຸດບຸກຄົນ ຜູ້ປະກອບດ້ວຍທຳ ໔ ປະການວ່າເປັນຜູ້ມີກຸສົນພຽບພ້ອມ ມີກຸສົນປະເສີດ ບັນລຸເຖິງອະຣະຫັດຕະຜົນອັນອຸດົມທີ່ຄວນບັນລຸເປັນ ສະມະນະບໍ່ມີໃຜສູ້ໄດ້ ທຳ ໔ ປະການ ອັນໃດແດ່ ຄື ຊ່າງໄມ້ເອີຍ ບຸກຄົນເຊັ່ນນັ້ນໃນໂລກນີ້

໑. ຍ່ອມບໍ່ເຮັດກຳຊົ່ວຊ້າທາງກາຍ
໒. ບໍ່ກ່າວວາຈາຊົ່ວຊ້າ
໓. ບໍ່ດຳຣິຄວາມດຳຣິຊົ່ວຊ້າ
໔. ບໍ່ປະກອບອາຊີບຊົ່ວຊ້າ

ຊ່າງໄມ້ເອີຍ ເຮົາບັນຍັດບຸຣຸດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການເຫຼົ່ານີ້ແລວ່າເປັນຜູ້ມີກຸສົນພຽບພ້ອມ ມີກຸສົນປະເສີດ ບັນລຸເຖິງອະຣະຫັດຕະຜົນອັນອຸດົມທີ່ຄວນບັນລຸໄດ້ ເປັນສະມະນະບໍ່ມີໃຜສູ້ໄດ້ ສັນໃດ ມີສະມະນະພາມບາງພວກກ່າວອ້າງສີນວ່າ ສູງສຸດສະມະນະພາມເຫຼົ່ານັ້ນໄດ້ກ່າວ ຄື ຍ່ອມກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມີດຈິດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ດ້ວຍເຫດພຽງສີນ ດ້ວຍເຫດພຽງຄວາມສັງລວມ ດ້ວຍເຫດພຽງຄວາມສັງວອນ ດ້ວຍເຫດພຽງຄວາມບໍ່ລ່ວງລະເມີດ ສັນນັ້ນຄືກັນ ລວມຄວາມວ່າ ສະມະນະພາມຜູ້ກ່າວອ້າງສີນວ່າສູງສຸດ ຯລຯ ໄດ້ກ່າວຄວາມມີດຈິດດ້ວຍຄວາມສັງລວມວ່າ ດ້ວຍການສະມາທານຂໍ້ອັດຕ່າງ ໆ

ຄຳວ່າ ຂໍ້ວັດ ໃນຄຳວ່າ ສະມາທານຂໍ້ວັດແລ້ວດຳຣົງຢູ່ ອະທິບາຍວ່າ ຖືເອົາ ສະມາທານ ຄື ຍຶດຖື ຮັບເອົາ ຖື ຍຶດໝັ້ນ ຖືໝັ້ນ ຂໍ້ວັດຢ່າງຊ້າງແດ່ ຂໍ້ວັດຢ່າງມ້າແດ່ ຂໍ້ວັດຢ່າງງົວແດ່ ຂໍ້ວັດຢ່າງແບ້ແດ່ ຂໍ້ວັດຢ່າງໝາແດ່ ຂໍ້ວັດຢ່າງກາແດ່ ຂໍ້ວັດຢ່າງທ້າວວາສຸເທບແດ່ ຂໍ້ວັດຢ່າງທ້າວປຸນນະພັດທະຣະແດ່ ຂໍ້ວັດຢ່າງທ້າວມະນີພັດທະຣະແດ່ ຂໍ້ວັດ ຄື ການບູຊາໄຟແດ່ ຂໍ້ວັດຢ່າງນາກແດ່ ຂໍ້ວັດຢ່າງຄຸດແດ່ ຂໍ້ວັດຢ່າງຍັກແດ່ ຂໍ້ວັດຢ່າງອະສູນແດ່ ຂໍ້ວັດຢ່າງຄົນທັບແດ່ ຂໍ້ວັດຢ່າງທ້າວມະຫາຣາດແດ່ ຂໍ້ວັດຢ່າງພຣະຈັນແດ່ ຂໍ້ວັດຢ່າງພຣະອາທິດແດ່ ຂໍ້ວັດຢ່າງພຣະອິນແດ່ ຂໍ້ວັດຢ່າງພຣະພົມແດ່ ຂໍ້ວັດຢ່າງເທວະດາແດ່ ຂໍ້ວັດຄືການໄຫວ້ທິດແດ່ແລ້ວດຳຣົງຢູ່ ຄື ດຳຣົງໝັ້ນ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອ ລວມຄວາມວ່າ ສະມາທານຂໍ້ວັດແລ້ວດຳຣົງຢູ່

ຄຳວ່າ ໃນທິດຖິນີ້ ໃນຄຳວ່າ ພວກເຮົາສຶກສາໃນທິດຖິນີ້ ແລະສຶກສາຄວາມບໍລິສຸດແຫ່ງຂໍ້ວັດນັ້ນ ໄດ້ແກ່ ໃນທິດຖິຂອງຕົນ ຄື ໃນຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ

ຄຳວ່າ ສຶກສາ ໄດ້ແກ່ ສຶກສາ ຄື ປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍພໍໃຈໃນການສະມາທານປະພຶດ ລວມຄວາມວ່າ ພວກເຮົາສຶກສາໃນທິດຖິນີ້ແລ

ຄຳວ່າ ແລະສຶກສາຄວາມບໍລິສຸດແຫ່ງຂໍ້ວັດນັ້ນ ອະທິບາຍວ່າ ແລະສຶກສາຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປແຫ່ງ ຂໍ້ວັດນັ້ນ ລວມຄວາມວ່າ ພວກເຮົາສຶກສາໃນທິດຖິນີ້ແລ ແລະສຶກສາຄວາມບໍລິສຸດແຫ່ງ ຂໍ້ວັດນັ້ນ

ຄຳວ່າ ຍ່ອມເປັນຜູ້ຖືກນຳເຂົ້າສູ່ພົບ ໃນຄຳວ່າ ກ່າວອ້າງຕົນວ່າເປັນຄົນສະຫຼາດຍ່ອມເປັນຜູ້ຖືກນຳເຂົ້າສູ່ພົບ ໄດ້ແກ່ ຍ່ອມເປັນຜູ້ຖືກນຳເຂົ້າສູ່ພົບ ຄື ຍ່ອມເປັນຜູ້ເຂົ້າເຖິງ ພົບຕິດໃຈໃນພົບ ນ້ອມໃຈເຊື່ອໃນພົບ ລວມຄວາມວ່າ ຍ່ອມເປັນຜູ້ຖືກນຳເຂົ້າສູ່ພົບ

ຄຳວ່າ ກ່າວອ້າງຕົນວ່າເປັນຄົນສະຫຼາດ ໄດ້ແກ່ ກ່າວອ້າງຕົນວ່າເປັນຄົນສະຫຼາດ ຄື ກ່າວອ້າງວ່າເປັນບັນດິດ ອ້າງວ່າເປັນນັກປາດ ອ້າງວ່າມີຍານ ອ້າງວ່າມີເຫດຜົນ ອ້າງວ່າມີ ຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ

ລວມຄວາມວ່າ ກ່າວອ້າງຕົນວ່າເປັນຄົນສະຫຼາດ ຍ່ອມເປັນຜູ້ຖືກນຳເຂົ້າສູ່ພົບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສະມະນະພາມຜູ້ກ່າວອ້າງສົບວ່າສູງສຸດ
ສະມາທານຂໍ້ວັດແລ້ວ ດຳຣົງຢູ່
ໄດ້ກ່າວຄວາມບໍລິສຸດດ້ວຍຄວາມສັງລວມວ່າ
ພວກເຮົາສຶກສາໃນທິດຖິນີ້ແລະສຶກສາຄວາມບໍລິສຸດແຫ່ງຂໍ້ວັດນັ້ນ
ສະມະນະພາມເຫຼົ່ານັ້ນກ່າວອ້າງຕົນວ່າເປັນຄົນສະຫຼາດ
ຍ່ອມເປັນຜູ້ຖືກນຳເຂົ້າສູ່ພົບ

[๑๓๘] (พระผู้มีพระพาภเจ้าตัดว่า)

ຖ້າບຸກຄົນເຄື່ອນຈາກສິນຂໍ້ວັດ ແລ້ວກໍຫວັ່ນໄຫວ
ເຂົາຍ່ອມເຝົ້າແຕ່ພ່ຳເພີ້ ແລະປາຖະໜາຄວາມມົດຈົດ
ເໝືອນຄົນອອກຈາກເຮືອນ ຢູ່ຮ່ວມກັບພວກເດີນທາງ
ພາດຫຼົງອອກຈາກພວກແລ້ວສັນນັ້ນ

## ວ່າດ້ວຍເຫດໃຫ້ເຄື່ອນຈາກສິນຂໍ້ວັດ

ຄຳວ່າ ຖ້າບຸກຄົນເຄື່ອນຈາກສິນຂໍ້ວັດ ອະທິບາຍວ່າ ບຸກຄົນເຄື່ອນຈາກສິນຂໍ້ວັດດ້ວຍເຫດ ໔ ຢ່າງ ຄື (໑) ເຄື່ອນຍ້ອນຜູ້ອື່ນຊີ້ຂາດ (໔) ເຄື່ອນຍ້ອນບໍ່ບັນລຸ ບຸກຄົນເຄື່ອນຍ້ອນຜູ້ອື່ນຊີ້ຂາດ ເປັນແນວໃດ? ຄື ຜູ້ອື່ນຊີ້ຂາດວ່າ "ສາດສະດານັ້ນບໍ່ແມ່ນສັບພັນຍູ ທຳບໍ່ແມ່ນສາດສະດາກ່າວສອນໄວ້ດີແລ້ວ ໝູ່ຄະນະບໍ່ແມ່ນຜູ້ປະຕິບັດດີແລ້ວ ທິດຖິບໍ່ແມ່ນສິ່ງທີ່ຈະເລີນ ປະຕິປະທາບໍ່ແມ່ນສາດສະດາບັນຍັດໄວ້ດີແລ້ວ ມັກ ບໍ່ແມ່ນທາງນຳສັດອອກຈາກທຸກ ໃນລັດທິນັ້ນບໍ່ມີຄວາມມົດຈົດ ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຫຼື ຄວາມຫຼຸດພົ້ນໄປ ຄື ໃນລັດທິນັ້ນ ສັດທັງຫຼາຍ ຍ່ອມມົດຈົດ ສະອາດ ບໍລິສຸດ ຫຼຸດໄປ ພົ້ນໄປ ຫຼືຫຼຸດພົ້ນໄປບໍ່ໄດ້ ສັດທັງຫຼາຍເປັນຜູ້ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍຊື່ວ່າຜູ້ອື່ນຊີ້ຂາດດ້ວຍອາການແນວນີ້ ຜູ້ທີ່ຖືກຊີ້ຂາດແນວນີ້ ຍ່ອມເຄື່ອນຈາກສາດສະດາເຄື່ອນຈາກທຳທີ່ສາດສະດາກ່າວສອນ ເຄື່ອນຈາກໝູ່ຄະນະ ເຄື່ອນຈາກທິດຖິ ເຄື່ອນຈາກປະຕິ ປະທາ ເຄື່ອນຈາກມັກ ບຸກຄົນຊື່ວ່າເຄື່ອນຍ້ອນຜູ້ອື່ນຊີ້ຂາດເປັນແນວນີ້ ບຸກຄົນເຄື່ອນຍ້ອນບໍ່ບັນລຸ ເປັນແນວໃດ? ຄື ບຸກຄົນບໍ່ບັນລຸສິນ ຈຶ່ງເຄື່ອນຈາກສິນ ບໍ່ບັນລຸຂໍ້ວັດ ຈຶ່ງເຄື່ອນຈາກ ຂໍ້ວັດ ບໍ່ບັນລຸສິນຂໍ້ວັດ ຈຶ່ງເຄື່ອນຈາກສິນຂໍ້ວັດ ບຸກຄົນຊື່ວ່າເຄື່ອນຍ້ອນບໍ່ບັນລຸ ເປັນແນວນີ້ລວມຄວາມວ່າ ຖ້າບຸກຄົນເຄື່ອນຈາກສິນຂໍ້ວັດ

ຄຳວ່າ ຫວັ່ນໄຫວ ໃນຄຳວ່າ ພາດກຳແລ້ວກໍຫວັ່ນໄຫວ ອະທິບາຍວ່າ ຫວັ່ນ ຫວັ່ນໄຫວ ຄື ຫວາດຫວັ່ນເລື້ອງສິນ ຂໍ້ວັດ ຫຼື ສິນຂໍ້ວັດວ່າ ເຮົາຜິດ ພັ້ງ ພາດ ຄາດໄປສາແລ້ວ ເຮົາຜິດພາດຈາກອະຣະຫັດຕະຜົນສາແລ້ວ ລວມຄວາມວ່າ ຫວັ່ນໄຫວ

ຄຳວ່າ ພາດແລ້ວ ອະທິບາຍວ່າ ຫວັ່ນ ຫວັ່ນໄຫວ ຄື ຫວາດຫວັ່ນເລື້ອງປຸນຍາພິສັງຂານ ອະປຸນຍາພິສັງຂານ ຫຼືອາເນນຊາພິສັງຂານວ່າ "ເຮົາຜິດ ພັ້ງ ພາດ ຄາດໄປສາແລ້ວ ເຮົາຜິດພາດຈາກອະຣະຫັດຕະຜົນສາແລ້ວ" ລວມຄວາມວ່າ ພາດແລ້ວກໍຫວັ່ນໄຫວ

ຄຳວ່າ ພ່ຳເພີ້ ໃນຄຳວ່າ ເຂົາຍ່ອມເຝົ້າແຕ່ພ່ຳເພີ້ແລະປາຖະໜາຄວາມມົດຈົດ ໄດ້ແກ່ ເພີ້ ພ່ຳເພີ້ ຄື ເພີ້ພົກເລື້ອງສິນ ຂໍ້ວັດ ຫຼື ສິນຂໍ້ວັດ ລວມຄວາມວ່າພ່ຳເພີ້

ຄຳວ່າ ແລະປາຖະໜາຄວາມມົດຈົດ ໄດ້ແກ່ ປາຖະໜາ ຄື ພໍໃຈ ໃຝ່ຝັນ ຄວາມມົດຈົດຍ້ອນສິນ ຄວາມມົດຈົດຍ້ອນຂໍ້ວັດ ຫຼື ຄວາມມົດຈົດຍ້ອນສິນຂໍ້ວັດລວມຄວາມວ່າ ເຂົາຍ່ອມເຝົ້າແຕ່ພ່ຳເພີ້ ແລະປາຖະໜາຄວາມມົດຈົດ

ຄຳວ່າ ເໝືອນຄົນອອກຈາກເຮືອນ ຢູ່ຮ່ວມກັບພວກເດີນທາງ ພາດຈາກພວກສາແລ້ວ ອະທິບາຍວ່າ ບຸຣຸດອອກຈາກເຮືອນ ຢູ່ຮ່ວມ ຄື ເປັນຢູ່ກັບພວກເດີນທາງພາດຈາກພວກ ຄື ຕິດຕາມພວກເດີນທາງໄປ ຫຼື ກັບມາສູ່ເຮືອນຂອງຕົນເອງ ສັນໃດ ເຈົ້າລັດທິນັ້ນ ກໍສັນນັ້ນຄືກັນ ຖືຄື ຍຶດໝັ້ນ ຖືໝັ້ນສາດສະດານັ້ນ ຫຼື ສາດສະດາອື່ນທຳທີ່ສາດສະດາກ່າວສອນນັ້ນ ຫຼືທຳທີ່ສາດສະດາກ່າວສອນອື່ນ ໝູ່ຄະນະນັ້ນຫຼືໝູ່ຄະນະອື່ນ ທິດຖິນັ້ນຫຼືທິດຖິອື່ນ ປະຕິປະທານັ້ນຫຼືປະຕິປະທາອື່ນ ມັກ ນັ້ນຫຼືມັກອື່ນ ລວມຄວາມວ່າ ເໝືອນຄົນອອກຈາກເຮືອນ ຢູ່ຮ່ວມກັບພວກເດີນທາງພາດຈາກພວກສາແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຖ້າບຸກຄົນເຄື່ອນຈາກສິນຂໍ້ວັດ ພາດແລ້ວກໍຫວັ່ນໄຫວ
ເຂົາຍ່ອມເຝົ້າແຕ່ພ່ຳເພີ້ ແລະປາຖະໜາຄວາມມົດຈົດ
ເໝືອນຄົນອອກຈາກເຮືອນ ຢູ່ຮ່ວມກັບພວກເດີນທາງ
ພາດຈາກພວກສາແລ້ວແນວນັ້ນ

[໑໓໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ອະຣິຍະສາວົກລະສິນຂໍ້ວັດໄດ້ທັງໝົດ
ລະກຳທີ່ມີໂທດແລະກຳທີ່ບໍ່ມີໂທດນັ້ນສາໄດ້
ບໍ່ປາຖະໜາຄວາມມົດຈົດແລະຄວາມບໍ່ມົດຈົດ
ງົດເວັ້ນແລ້ວ ບໍ່ຍຶດໝັ້ນທິດຖິທີ່ມີຢູ່ທົ່ວໄປ

ຄຳວ່າ ລະສິນຂໍ້ວັດໄດ້ທັງໝົດ ອະທິບາຍວ່າ ລະ ຄື ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມົດຈົດຍ້ອນສິນໄດ້ທັງໝົດ ຯລຯ ຄວາມມົດຈົດຍ້ອນ ຂໍ້ວັດໄດ້ທັງໝົດ ຯລຯ ລະ ຄື ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມົດຈົດຍ້ອນສິນຂໍ້ວັດໄດ້ທັງໝົດ ລວມຄວາມວ່າ ລະສິນຂໍ້ວັດໄດ້ທັງໝົດ

## ວ່າດ້ວຍກຳມີໂທດແລະກຳບໍ່ມີໂທດ

ຄຳວ່າ ລະກຳທີ່ມີໂທດ ແລະກຳທີ່ບໍ່ມີໂທດນັ້ນສາໄດ້ ອະທິບາຍວ່າ ກຳດຳມີວິບາກດຳຕັດຮຽກວ່າ ກຳທີ່ມີໂທດ ກຳຂາວ ມີວິບາກຂາວ ຕັດຮຽກວ່າ ກຳ ທີ່ບໍ່ມີໂທດ ພຣະອະຣິຍະສາວົກ ລະ ຄື ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງກຳທີ່ມີໂທດແລະກຳທີ່ບໍ່ມີໂທດໄດ້ແລ້ວ ລວມຄວາມວ່າ ລະກຳທີ່ມີໂທດແລະ ກຳທີ່ບໍ່ມີໂທດນັ້ນສາໄດ້

ຄຳວ່າ ຄວາມບໍ່ມົດຈົດ ໃນຄຳວ່າ ບໍ່ປາຖະໜາຄວາມມົດຈົດ ແລະຄວາມບໍ່ມົດຈົດ ໄດ້ແກ່ ພວກປຸຖຸຊົນປາຖະໜາຄວາມບໍ່ມົດຈົດ ຄື ປາຖະໜາອະກຸສົນທຳ

ຄຳວ່າ ຄວາມມົດຈົດ ອະທິບາຍວ່າ ພວກປຸຖຸຊົນປາຖະໜາຄວາມມົດຈົດ ຄື ປາຖະໜາກາມມະຄຸນ ໕ ປາຖະໜາຄວາມບໍ່ມົດຈົດ ຄື ປາຖະໜາອະກຸສົນທຳ ແລະກາມມະຄຸນ ໕ ປາຖະໜາຄວາມມົດຈົດ ຄື ປາຖະໜາທິດຖິ ໖໒ ປາຖະໜາຄວາມບໍ່ມົດຈົດ ຄື ປາຖະໜາອະກຸສົນທຳ ກາມມະຄຸນ ໕ ແລະທິດຖິ ໖໒ ປາຖະໜາຄວາມມົດຈົດ ຄື ປາຖະໜາກຸສົນທຳອັນມີໃນໄຕຣທາດ ປາຖະໜາຄວາມບໍ່ມົດຈົດ ຄື ປາຖະໜາອະກຸສົນທຳ ກາມມະຄຸນ ໕ ທິດຖິ ໖໒ ແລະກຸສົນທຳອັນມີໃນໄຕຣທາດ ພວກກັນລະຍານະປຸຖຸຊົນ ປາຖະໜາຄວາມສະອາດ ຄື ປາຖະໜາຄວາມກ້າວສູ່ອະຣິຍະມັກ ພຣະເສຂະປາຖະໜາອະຣະຫັດຕະຜົນ ເຊິ່ງເປັນທຳອັນເລີດ ເມື່ອບັນລຸອະຣະຫັດຕະຜົນ ພຣະອະຣະຫັນບໍ່ປາຖະໜາອະກຸສົນທຳ ບໍ່ປາຖະໜາກາມມະຄຸນ ໕ ບໍ່ປາຖະໜາທິດຖິ ໖໒ ບໍ່ປາຖະໜາກຸສົນທຳອັນມີໃນໄຕຣທາດ ບໍ່ປາຖະໜາຄວາມກ້າວສູ່ອະຣິຍະມັກ ບໍ່ປາຖະໜາອະຣະຫັດຕະຜົນເຊິ່ງເປັນທຳອັນເລີດ ພຣະອະຣະຫັນກ້າວລ່ວງຄວາມປາຖະໜາ ລ່ວງພົ້ນຄວາມຈະເລີນແລະຄວາມເສື່ອມສາແລ້ວ ພຣະອະຣະຫັນນັ້ນຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ฯລฯ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ບໍ່ປາຖະໜາຄວາມມົດຈົດແລະຄວາມບໍ່ມົດຈົດ

ຄຳວ່າ ງົດເວັ້ນແລ້ວ ໃນຄຳວ່າ ງົດເວັ້ນແລ້ວ ບໍ່ຍຶດໝັ້ນທິດຖິທີ່ມີຢູ່ທ່ຽວໄປອະທິບາຍວ່າ ງົດ ງົດເວັ້ນ ຄື ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມມົດຈົດແລະຄວາມບໍ່ມົດຈົດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າງົດເວັ້ນແລ້ວ

ຄຳວ່າ ທ່ຽວໄປ ໄດ້ແກ່ ທ່ຽວໄປ ຄື ທ່ອງທ່ຽວໄປ ຢູ່ ເຄື່ອນໄຫວ ເປັນໄປລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ງົດເວັ້ນແລ້ວ ທ່ຽວໄປ

ຄຳວ່າ ບໍ່ຍຶດໝັ້ນທິດຖິທີ່ມີຢູ່ ອະທິບາຍວ່າ ທິດຖິ ໖໒ ຕັດຮຽກວ່າ ທິດຖິທີ່ມີຢູ່ ພຣະອະຣະຫັນບໍ່ຍຶດ ຄື ບໍ່ຍຶດໝັ້ນ ບໍ່ຖືໝັ້ນທິດຖິທີ່ມີຢູ່ ລວມຄວາມວ່າ ງົດເວັ້ນແລ້ວບໍ່ຍຶດໝັ້ນທິດຖິທີ່ມີຢູ່ທ່ຽວໄປ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ອະຣິຍະສາວົກລະສິນຂໍ້ວັດໄດ້ທັງໝົດ<br>
ລະກຳທີ່ມີໂທດແລະກຳທີ່ບໍ່ມີໂທດນັ້ນສາໄດ້<br>
ບໍ່ປາຖະໜາຄວາມມົດຈົດແລະຄວາມບໍ່ມົດຈົດ<br>
ງົດເວັ້ນແລ້ວ ບໍ່ຍຶດໝັ້ນທິດຖິທີ່ມີຢູ່ທ່ຽວໄປ

[๑๓๖] (พระผู้มีพระพาคเจ้าตัดว่า)

ສະມະນະພາມເຂົ້າໄປອາໄສຕະບະທີ່ຕົນກຽດຊັງນັ້ນ
ເຂົ້າໄປອາໄສຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້
ເປັນຜູ້ກ່າວຄວາມບໍລິສຸດໃນສົງສານຂ້າງໜ້າ
ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່
ຈຶ່ງຍັງຕ້ອງເວົ້າເຖິງຄວາມບໍລິສຸດຢູ່

ຄຳວ່າ ສະມະນະພາມເຂົ້າໄປອາໄສຕະບະທີ່ຕົນກຽດຊັງນັ້ນ ອະທິບາຍວ່າສະມະນະພາມບາງພວກ ມີວາທະກຽດຊັງຕະບະ ຖືການກຽດຊັງຕະບະເປັນສະລະນະອາໄສ ຄື ອີງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອຄວາມກຽດຊັງຕະບະ ລວມຄວາມວ່າ ສະມະນະພາມເຂົ້າໄປອາໄສຕະບະທີ່ຕົນກຽດຊັງນັ້ນ

ຄຳວ່າ ເຂົ້າໄປອາໄສຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ ອະທິບາຍວ່າ ອາໄສເຂົ້າໄປອາໄສ ຄື ຖື ຍຶດໝັ້ນ ຖືໝັ້ນຮູບທີ່ເຫັນ ຫຼື ຄວາມບໍລິສຸດຍ້ອນຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ຄວາມບໍລິສຸດຍ້ອນສຽງທີ່ໄດ້ຍິນ ອາລົມທີ່ຮັບຮູ້ ຫຼື ຄວາມບໍລິສຸດຍ້ອນອາລົມທີ່ຮັບຮູ້ ລວມຄວາມວ່າ ເຂົ້າໄປອາໄສຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້

ຄຳວ່າ ເປັນຜູ້ກ່າວຄວາມບໍລິສຸດໃນສົງສານຂ້າງໜ້າ ຯລຯ ຈຶ່ງຍັງພ່ຳເວົ້າເຖິງຄວາມບໍລິສຸດຢູ່ ອະທິບາຍວ່າ ສະມະນະພາມບາງພວກ ເປັນຜູ້ກ່າວຄວາມບໍລິສຸດໃນສົງສານຂ້າງໜ້າສະມະນະພາມພວກໃດ ເປັນຜູ້ກ່າວຄວາມບໍລິສຸດໃນສົງສານຂ້າງໜ້າ ສະມະນະພາມເຫຼົ່າໃດ ເປັນຜູ້ຖືຄວາມບໍລິສຸດໂດຍສ່ວນດຽວ ຖືຄວາມບໍລິສຸດໂດຍການວຽນວ່າຍຕາຍເກີດ ຜູ້ມີຄວາມເຫັນວ່າເຮັດແລ້ວບໍ່ເປັນອັນເຮັດ ມີວາທະວ່າທ່ຽງ ສະມະນະພາມເຫຼົ່ານັ້ນ ຊື່ວ່າເປັນຜູ້ກ່າວຄວາມບໍລິສຸດໃນສົງສານຂ້າງໜ້າ ສະມະນະພາມເຫຼົ່ານັ້ນກໍເວົ້າ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ໂດຍສົງສານລວມຄວາມວ່າ ເປັນຜູ້ກ່າວຄວາມບໍລິສຸດໃນສົງສານຂ້າງໜ້າ ຯລຯ ຈຶ່ງຍັງຕ້ອງເວົ້າເຖິງຄວາມບໍລິສຸດຢູ່

ຄຳວ່າ ຕັນຫາ ໃນຄຳວ່າ ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່ ໄດ້ແກ່ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ໃນພົບນ້ອຍພົບໃຫຍ່ ອະທິບາຍວ່າ ຜູ້ຍັງບໍ່ຄາຍຕັນຫາ ຄື ບໍ່ປາສະຈາກຕັນຫາ ບໍ່ສະລະຕັນຫາ ບໍ່ຄາຍຕັນຫາ ບໍ່ປົດຕັນຫາ ບໍ່ລະຕັນຫາ ບໍ່ສະລັດຖິ້ມຕັນຫາໃນພົບນ້ອຍພົບໃຫຍ່ ຄື ໃນກຳມະວັດແລະວິປາກະວັດ ໃນກຳມະວັດເປັນເຄື່ອງເກີດໃນກາມະພົບໃນວິປາກະວັດເປັນ

ເຄື່ອງເກີດໃນກາມະພົບ ໃນກຳມະວັດເປັນເຄື່ອງເກີດໃນຮູບພົບ ໃນວິປາກະວັດເປັນເຄື່ອງເກີດໃນຮູບພົບ ໃນກຳມະວັດເປັນເຄື່ອງເກີດໃນອະຮູບພົບ ໃນວິປາກະວັດເປັນເຄື່ອງເກີດໃນອະຮູບພົບ ໃນພົບຕໍ່ໄປ ໃນຄະຕິຕໍ່ໄປ ໃນການຖືກຳເນີດຕໍ່ໄປ ໃນປະຕິສົນທິຕໍ່ໄປ ໃນການບັງເກີດຂອງອັດຕະພາບຕໍ່ໄປ ລວມຄວາມວ່າ ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສະມະນະພາມເຂົ້າໄປອາໄສຕະນະທີ່ຕົນກຽດຊັງນັ້ນ
ເຂົ້າໄປອາໄສຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້
ເປັນຜູ້ກ່າວຄວາມມົດຈິດໃນສົງສານຂ້າງໜ້າ
ຍັງບໍ່ຄາຍຕັນຫາໃນພົບນ້ອຍພົບໃຫຍ່
ຈຶ່ງຍັງຕ້ອງເວົ້າເຖິງຄວາມມົດຈົດຢູ່

[໑໓ກ] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄວາມພໍໃຈວັດຖຸຍ່ອມມີແກ່ຜູ້ກຳລັງປາຖະໜາ
ອັນໜຶ່ງ ຄວາມຫວັ່ນໄຫວຍ່ອມມີຍ້ອນວັດຖຸທີ່ກຳນົດແລ້ວ
ຄວາມຕາຍແລະຄວາມເກີດບໍ່ໄດ້ມີແກ່ພິກຂຸໃດໃນທຳວິໄນນີ້
ພິກຂຸນັ້ນເພິ່ງຫວັ່ນໄຫວດ້ວຍເຫດອັນໃດ ຫຼື ເພິ່ງພໍໃຈໃນອັນໃດ

ຄຳວ່າ ຄວາມພໍໃຈວັດຖຸຍ່ອມມີແກ່ຜູ້ກຳລັງປາຖະໜາ ອະທິບາຍວ່າ ຕັນຫາຕັດຮຽກວ່າຄວາມປາຖະໜາ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາອະກຸສົນມູນຄືໂລພະ

ຄຳວ່າ ຜູ້ກຳລັງປາຖະໜາ ໄດ້ແກ່ ຜູ້ກຳລັງປາຖະໜາ ຄື ຜູ້ກຳລັງຕ້ອງການ ຍິນດີມຸ້ງໝາຍ ມຸ້ງຫວັງ ລວມຄວາມວ່າ ຜູ້ກຳລັງປາຖະໜາ

ຄຳວ່າ ພໍໃຈ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມພໍໃຈ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ ລວມຄວາມວ່າຄວາມພໍໃຈວັດຖຸຍ່ອມມີແກ່ຜູ້ກຳລັງປາຖະໜາ

ຄຳວ່າ ຄວາມກຳນົດ ໃນຄຳວ່າ ອັນໜຶ່ງ ຄວາມຫວັ່ນໄຫວຍ່ອມມີຍ້ອນວັດຖຸທີ່ກຳນົດແລ້ວ ໄດ້ແກ່ ຄວາມກຳນົດ ໒ ຢ່າງ ຄື (໑) ຄວາມກຳນົດດ້ວຍອຳນາດຕັນຫາ (໒) ຄວາມກຳນົດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດທິດຖິ

ຄຳວ່າ ອັນໜຶ່ງ ຄວາມຫວັ່ນໄຫວຍ່ອມມີຍ້ອນວັດຖຸທີ່ກຳນົດແລ້ວ ອະທິບາຍວ່າຜູ້ຫວາດຣະແວງວ່າ ວັດຖຸທີ່ກຳນົດໄວ້ແລ້ວຈະຖືກແຍ່ງຊີງໄປ ຍ່ອມຫວັ່ນໄຫວແດ່ ເມື່ອວັດຖຸນັ້ນກຳລັງຖືກແຍ່ງຊີງໄປ ຍ່ອມຫວັ່ນໄຫວແດ່ ເມື່ອວັດຖຸນັ້ນຖືກແຍ່ງຊີງໄປແລ້ວ ຍ່ອມຫວັ່ນໄຫວແດ່ ຜູ້ຫວາດຣະແວງວ່າ ວັດຖຸທີ່ກຳນົດໄວ້ແລ້ວຈະຜັນປ່ຽນໄປ ຍ່ອມຫວັ່ນໄຫວແດ່ ເມື່ອວັດຖຸນັ້ນກຳລັງຜັນປ່ຽນໄປ ຍ່ອມຫວັ່ນໄຫວແດ່ ເມື່ອວັດຖຸນັ້ນຜັນປ່ຽນໄປແລ້ວ ຍ່ອມຫວັ່ນໄຫວ ຄື ສັ່ນເຊນກະສັບກະສ່າຍຢູ່ແດ່ ລວມຄວາມວ່າ ອັນໜຶ່ງ ຄວາມຫວັ່ນໄຫວຍ່ອມມີຍ້ອນວັດຖຸທີ່ກຳນົດແລ້ວ

ຄຳວ່າ ພິກຂຸໃດ ໃນຄຳວ່າ ຄວາມຕາຍແລະຄວາມເກີດບໍ່ໄດ້ມີແກ່ພິກຂຸໃດໃນທຳວິໄນນີ້ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ ອະທິບາຍວ່າ ການໄປ ການມາ ການໄປ ແລະການມາ ຄວາມຕາຍ ຄະຕິ ພົບນ້ອຍພົບໃຫຍ່ ຈຸຕິ ການຖືກຳເນີດ ຄວາມເກີດ ຄວາມດັບຊາດ ຊະຣາ ມໍຣະນະ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ແກ່ພຣະອະຣະຫັນຕະຂີນາສົບໃດໄດ້ແກ່ ຄວາມຕາຍແລະຄວາມເກີດນັ້ນ ພຣະອະຣະຫັນຕະຂີນາສົບ ລະໄດ້ແລ້ວ ຕັດຂາດໄດ້ແລ້ວເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟ ຄື ຍານແລ້ວລວມຄວາມວ່າ ຄວາມຕາຍແລະຄວາມເກີດບໍ່ໄດ້ມີແກ່ພິກຂຸໃດໃນທຳວິໄນນີ້

ຄຳວ່າ ພິກຂຸນັ້ນເພິ່ງຫວັ່ນໄຫວດ້ວຍເຫດອັນໃດ ຫຼື ເພິ່ງພໍໃຈໃນອັນໃດ ອະທິບາຍວ່າພິກຂຸນັ້ນເພິ່ງຫວັ່ນໄຫວດ້ວຍຣາຄະ ໂທສະ ໂມຫະ ມານະ ທິດຖິ ອຸດທັດຈະ ວິຈິກິດສາ ອະນຸໄສ

ອັນໃດວ່າ "ເປັນຜູ້ກຳໜັດ ເປັນຜູ້ຂັດເຄືອງ ເປັນຜູ້ຫຼົງ ເປັນຜູ້ຍຶດຕິດ ເປັນຜູ້ຍຶດໝັ້ນເປັນຜູ້ຟຸ້ງຊ່ານ ເປັນຜູ້ລັງເລ ຫຼື ວ່າ ເປັນຜູ້ຕົກຢູ່ໃນພະລັງກິເລດ" ພິກຂຸນັ້ນລະອະພິສັງຂານເຫຼົ່ານັ້ນໄດ້ແລ້ວ ຍ້ອນເປັນຜູ້ລະອະພິສັງຂານໄດ້ແລ້ວ ພິກຂຸເພິ່ງຫວັ່ນໄຫວດ້ວຍເຫດອັນໃດຕາມຄະຕິວ່າ "ເປັນຜູ້ເກີດໃນນະຣົກ ເປັນຜູ້ເກີດໃນກຳເນີດເດຍຣັດສານເປັນຜູ້ເກີດໃນເຜດວິໄສ ເປັນມະນຸດ ເປັນເທບ ເປັນຜູ້ມີຮູບ ເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼືວ່າເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ" ພິກຂຸນັ້ນເພິ່ງຫວັ່ນໄຫວ ຄື ສັ່ນເຊນ ກະສັບກະສ່າຍດ້ວຍເຫດ ປັດໄຈ ແລະການໃດ ເຫດ ປັດໄຈ ແລະການນັ້ນ ບໍ່ມີ ລວມຄວາມວ່າ ພິກຂຸນັ້ນເພິ່ງຫວັ່ນໄຫວດ້ວຍເຫດອັນໃດ

ຄຳວ່າ ຫຼືເພິ່ງພໍໃຈໃນອັນໃດ ອະທິບາຍວ່າ ຫຼືວ່າ ເພິ່ງພໍໃຈໃນອັນໃດ ຄື ເພິ່ງພໍໃຈໃນວັດຖຸອັນໃດ ໄດ້ແກ່ ເພິ່ງພໍໃຈ ຮັກແພງ ພໍໃຈໃນວັດຖຸນັ້ນແນວໃດ ລວມຄວາມວ່າພິກຂຸນັ້ນເພິ່ງຫວັ່ນໄຫວດ້ວຍເຫດອັນໃດ ຫຼື ເພິ່ງພໍໃຈໃນອັນໃດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄວາມພໍໃຈວັດຖຸຍ່ອມມີແກ່ຜູ້ກຳລັງປາຖະໜາ
ອັນໜຶ່ງ ຄວາມຫວັ່ນໄຫວຍ່ອມມີຍ້ອນວັດຖຸທີ່ກຳນົດແລ້ວ
ຄວາມຕາຍແລະຄວາມເກີດບໍ່ໄດ້ມີແກ່ພິກຂຸໃດໃນທຳວິໄນນີ້
ພິກຂຸນັ້ນເພິ່ງຫວັ່ນໄຫວດ້ວຍເຫດອັນໃດ ຫຼື ເພິ່ງພໍໃຈໃນອັນໃດ

[໑໓໘] (ພຣະພຸດທະເນຣະມິດທູນຖາມວ່າ)

ສະມະນະພາມບາງພວກກ່າວທຳໃດວ່າ ຍັງມ
ແຕ່ສະມະນະພາມພວກອື່ນກັບກ່າວທຳນັ້ນ ໆ ເອງວ່າ ຊົ່ວ
ວາທະຂອງສະມະນະພາມເຫຼົ່ານີ້ ວາທະໃດຈິງກັນນໍ
ຍ້ອນສະມະນະພາມເຫຼົ່ານີ້ທຸກພວກ
ຕ່າງກ່າວອ້າງຕົນວ່າ ເປັນຄົນສະຫຼາດ

ຄຳວ່າ ສະມະນະພາມບາງພວກກ່າວທຳໃດວ່າ ຍັງມ ອະທິບາຍວ່າ ສະມະນະພາມບາງພວກ ກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງທຳ ຄື ທິດຖິ ປະຕິປະທາ ມັກ ໃດ ແນວນີ້ວ່າ "ທຳນີ້ ຍັງມ ຄື ຍອດ ປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດ" ລວມຄວາມວ່າ ສະມະນະພາມບາງພວກກ່າວທຳໃດວ່າ ຍັງມ

ຄຳວ່າ ແຕ່ສະມະນະພາມພວກອື່ນກັບກ່າວທຳນັ້ນ ໆເອງວ່າ ຊົ່ວ ອະທິບາຍວ່າສະມະນະພາມອີກພວກໜຶ່ງກັບກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງທຳ ຄື ທິດຖິປະຕິປະທາ ມັກນັ້ນ ໆເອງ ແນວນີ້ວ່າ "ທຳນີ້ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍ" ລວມຄວາມວ່າ ແຕ່ສະມະນະພາມພວກອື່ນກັບກ່າວທຳນັ້ນ ນັ້ນເອງວ່າ ຊົ່ວ

ຄຳວ່າ ວາທະຂອງສະມະນະພາມເຫຼົ່ານີ້ ວາທະໃດຈິງກັນນໍ ອະທິບາຍວ່າ ວາທະຂອງສະມະນະພາມເຫຼົ່ານີ້ ວາທະໃດ ຈິງ ຄື ແທ້ ແທ້ຈິງ ເປັນຈິງ ແນ່ນອນ ບໍ່ວິປະຣິດ ລວມຄວາມວ່າ ວາທະຂອງສະມະນະພາມເຫຼົ່ານີ້ ວາທະໃດຈິງກັນນໍ

ຄຳວ່າ ຍ້ອນສະມະນະພາມເຫຼົ່ານີ້ທຸກພວກຕ່າງກ່າວອ້າງຕົນວ່າ ເປັນຄົນສະຫຼາດ ອະທິບາຍວ່າ ສະມະນະພາມເຫຼົ່ານີ້ທຸກພວກ ຕ່າງກ່າວອ້າງຕົນວ່າ ເປັນຄົນສະຫຼາດຄື ກ່າວອ້າງວ່າເປັນບັນດິດ ອ້າງວ່າເປັນນັກປາດ ອ້າງວ່າມີຍານ ອ້າງວ່າມີເຫດຜົນ ອ້າງວ່າມີຄຸນລັກສະນະ ອ້າງວ່າເໝາະແກ່ເຫດ ອ້າງວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າ ຍ້ອນສະມະນະພາມເຫຼົ່ານີ້ ທຸກພວກຕ່າງກ່າວອ້າງຕົນວ່າ ເປັນຄົນສະຫຼາດດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ສະມະນະພາມບາງພວກກ່າວທຳໃດວ່າຍັງມ
ແຕ່ສະມະນະພາມພວກອື່ນກັບກ່າວທຳນັ້ນ ໆເອງວ່າຊົ່ວ
ວາທະຂອງສະມະນະພາມເຫຼົ່ານີ້ ວາທະໃດຈິງກັນນໍ
ຍ້ອນສະມະນະພາມເຫຼົ່ານີ້ທຸກພວກ
ຕ່າງກ່າວອ້າງຕົນວ່າ ເປັນຄົນສະຫຼາດ

[๑๓๙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ອັນໜຶ່ງ ສະມະນະພາມບາງພວກ
ກ່າວທຳຂອງຕົນວ່າ ບໍລິບູນ ແຕ່ກ່າວທຳຂອງຜູ້ອື່ນວ່າ ຊົ່ວ
ພວກສະມະນະພາມຖືໝັ້ນແມ່ນແນວນີ້ແລ້ວຍ່ອມວິວາດກັນ
ຍ້ອນຕ່າງກ່າວທິດຖິສົມມຸດຂອງຕົນໆ ວ່າ ຈິງ

ຄຳວ່າ ອັນໜຶ່ງ ສະມະນະພາມບາງພວກກ່າວທຳຂອງຕົນວ່າ ບໍລິບູນອະທິບາຍວ່າ ອັນໜຶ່ງ ສະມະນະພາມບາງພວກກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງທຳ ຄື ທິດຖິ ປະຕິປະທາ ມັກຂອງຕົນ ແນວນີ້ວ່າ "ທຳນີ້ພຽບພ້ອມ ບໍລິບູນ ບໍ່ບົກຜ່ອງ"ລວມຄວາມວ່າ ອັນໜຶ່ງ ສະມະນະພາມບາງພວກກ່າວທຳຂອງຕົນວ່າ ບໍລິບູນ

ຄຳວ່າ ແຕ່ກ່າວທຳຂອງຜູ້ອື່ນວ່າ ຊົ່ວ ອະທິບາຍວ່າ ສະມະນະພາມພວກດຽວ ກັນນັ້ນ ກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງທຳ ຄື ທິດຖິ ປະຕິປະທາ ມັກ ຂອງຜູ້ອື່ນ ແນວນີ້ວ່າ "ທຳນີ້ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຮັງກຽດ ຫຍາບຊ້າ ຕ່ຳຕ້ອຍ" ລວມຄວາມວ່າ ແຕ່ກ່າວທຳຂອງຜູ້ອື່ນວ່າ ຊົ່ວ

ຄຳວ່າ ພວກສະມະນະພາມຖືໝັ້ນແມ່ນແນວນີ້ແລ້ວຍ່ອມວິວາດກັນ ອະທິບາຍວ່າພວກສະມະນະພາມ ຈັບ ຍຶດ ຖື ຍຶດໝັ້ນ ຖືໝັ້ນແນວນີ້ ຍ່ອມວິວາດກັນ ຄື ຍ່ອມກໍ່ການຜິດຖຽງ ກໍ່ການໝາງໃຈ ກໍ່ການຍາດແຍ່ງ ກໍ່ການວິວາດ ກໍ່ການມຸ້ງຮ້າຍກັນໂດຍເວົ້າວ່າ "ທ່ານບໍ່ຮູ້ທຳວິໄນນີ້ ฯລฯ ຫຼືຫາກທ່ານສາມາດ ກໍຈົ່ງແກ້ໄຂເທີ້ນ" ລວມຄວາມວ່າ ພວກສະມະນະພາມຖືໝັ້ນແມ່ນແນວນີ້ແລ້ວຍ່ອມວິວາດກັນ

ຄຳວ່າ ຍ້ອນຕ່າງກ່າວທິດຖິສົມມຸດຂອງຕົນໆ ວ່າ ຈິງ ອະທິບາຍວ່າ ຕ່າງກ່າວວ່າ"ໂລກທ່ຽງ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ" ລວມຄວາມວ່າ ຍ້ອນຕ່າງກ່າວທິດຖິສົມມຸດຂອງຕົນ ວ່າ ຈິງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ອັນໜຶ່ງ ສະມະນະພາມບາງພວກ
ກ່າວທຳຂອງຕົນວ່າ ບໍລິບູນ ແຕ່ກ່າວທຳຂອງຜູ້ອື່ນວ່າ ຊົ່ວ
ພວກສະມະນະພາມຖືໝັ້ນແມ່ນແນວນີ້ແລ້ວຍ່ອມວິວາດກັນ
ຍ້ອນຕ່າງກ່າວທິດຖິສົມມຸດຂອງຕົນໆ ວ່າ ຈິງ

[๑๔๐] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ຫາກບຸກຄົນເປັນຄົນຊົ່ວຍ້ອນເຫດທີ່ຜູ້ອື່ນເວົ້າຕິຕຽນແລ້ວ
ກໍຈະບໍ່ເພິ່ງມີໃຜວິເສດໃນທຳທັງຫຼາຍໄດ້ເລີຍ

ຍ້ອນຄົນສ່ວນຫຼາຍຕ່າງກ່າວຢັ້ງຢືນໃນແນວທາງຂອງຕົນ
ພາກັນກ່າວທຳຂອງຜູ້ອື່ນໂດຍຄວາມເປັນສິ່ງຊົ່ວຊາມ

ຄຳວ່າ ຫາກບຸກຄົນເປັນຄົນຊົ່ວຍ້ອນເຫດທີ່ຜູ້ອື່ນເວົ້າຕິຕຽນແລ້ວ ອະທິບາຍວ່າຫາກບຸກຄົນອື່ນເປັນຄົນພານ ຊົ່ວ ຄື ຊາມ ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍຍ້ອນເຫດທີ່ຜູ້ອື່ນຕິຕຽນ ຄື ຍ້ອນເຫດທີ່ຜູ້ອື່ນນິນທາ ຕຳໜິ ວ່າຮ້າຍແລ້ວ ລວມຄວາມວ່າ ຫາກບຸກຄົນເປັນຄົນຊົ່ວຍ້ອນເຫດທີ່ຜູ້ອື່ນເວົ້າຕິຕຽນແລ້ວ

ຄຳວ່າ ກໍຈະບໍ່ເພິ່ງມີໃຜວິເສດໃນທຳທັງຫຼາຍໄດ້ເລີຍ ອະທິບາຍວ່າ ກໍຈະບໍ່ເພິ່ງມີໃຜເລີດປະເສີດ ວິເສດ ນຳໜ້າ ສູງສຸດ ປະເສີດສຸດໃນທຳທັງຫຼາຍໄດ້ເລີຍ ລວມຄວາມວ່າ ກໍຈະບໍ່ເພິ່ງມີໃຜວິເສດໃນທຳທັງຫຼາຍໄດ້ເລີຍ

ຄຳວ່າ ຍ້ອນຄົນສ່ວນຫຼາຍ ຯລຯ ພາກັນກ່າວທຳຂອງຜູ້ອື່ນໂດຍຄວາມເປັນສິ່ງຊົ່ວຊາມ ອະທິບາຍວ່າ ຄົນສ່ວນຫຼາຍພາກັນກ່າວ ຄື ວ່າຮ້າຍ ນິນທາ ຕິຕຽນທຳຂອງຄົນສ່ວນຫຼາຍ ໂດຍຄວາມເປັນສິ່ງຊົ່ວ ຊາມ ຄື ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍແດ່ ຄົນສ່ວນຫຼາຍພາກັນກ່າວ ຄື ວ່າຮ້າຍ ນິນທາ ຕິຕຽນທຳຂອງຄົນຜູ້ໜຶ່ງ ໂດຍຄວາມເປັນສິ່ງຊົ່ວ ຊາມ ຄື ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍແດ່ ຄົນຜູ້ໜຶ່ງກ່າວ ຄື ວ່າຮ້າຍ ນິນທາ ຕິຕຽນທຳຂອງຄົນສ່ວນຫຼາຍ ໂດຍຄວາມເປັນສິ່ງຊົ່ວ ຊາມ ຄື ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍແດ່ ຄົນຜູ້ໜຶ່ງກ່າວ ຄື ວ່າຮ້າຍ ນິນທາ ຕິຕຽນທຳຂອງຄົນຜູ້ໜຶ່ງ ໂດຍຄວາມເປັນສິ່ງຊົ່ວ ຊາມ ຄື ຕ່ຳຊາມ ໜ້າຣັງກຽດ ຫຍາບຊ້າ ຕ່ຳຕ້ອຍແດ່ ລວມຄວາມວ່າ ຍ້ອນຄົນສ່ວນຫຼາຍ ຯລຯ ພາກັນກ່າວທຳຂອງຜູ້ອື່ນ ໂດຍຄວາມເປັນສິ່ງຊົ່ວຊາມ

ຄຳວ່າ ຕ່າງກ່າວຢັ້ງຢືນໃນແນວທາງຂອງຕົນ ຯລຯ ໂດຍຄວາມເປັນສິ່ງຊົ່ວຊາມ

ອະທິບາຍວ່າ ທຳ ຊື່ວ່າແນວທາງຂອງຕົນ ທິດຖິ ຊື່ວ່າແນວທາງຂອງຕົນ ປະຕິ ປະທາ ຊື່ວ່າແນວທາງຂອງຕົນ ມັກ ກໍຊື່ວ່າແນວທາງຂອງຕົນ ຄົນສ່ວນຫຼາຍຕ່າງກ່າວຢັ້ງຢືນ ຄື ກ່າວໝັ້ນຄົງ ກ່າວແຂງຂັນ ກ່າວໜັກແໜ້ນໃນແນວທາງຂອງຕົນ ລວມຄວາມວ່າ ຕ່າງກ່າວຢືນຢັນໃນແນວທາງຂອງຕົນ ຯລຯ ໂດຍຄວາມເປັນສິ່ງຊົ່ວຊາມ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຫາກບຸກຄົນເປັນຄົນຊົ່ວຍ້ອນເຫດທີ່ຜູ້ອື່ນເວົ້າຕິຕຽນແລ້ວ
ກໍຈະບໍ່ເພິ່ງມີໃຜວິເສດໃນທຳທັງຫຼາຍໄດ້ເລີຍ
ຍ້ອນຄົນສ່ວນຫຼາຍຕ່າງກ່າວຢັ້ງຢືນໃນແນວທາງຂອງຕົນ
ພາກັນກ່າວທຳຂອງຜູ້ອື່ນໂດຍຄວາມເປັນສິ່ງຊົ່ວຊາມ

[໑໔໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ການບູຊາຫຼັກການຂອງຕົນ ເປັນເລື້ອງແທ້ຈິງ
ເໝືອນພວກສະມະນະພາມພາກັນສັນເສີນແນວທາງຂອງຕົນ
ການວ່າຮ້າຍທຸກຢ່າງກໍເພິ່ງມີຢູ່ແທ້ຈິງ
ຍ້ອນຄວາມມົດຈົດຂອງສະມະນະພາມເຫຼົ່ານັ້ນ
ເປັນເລື້ອງສະເພາະຕົນເທົ່ານັ້ນ

ຄຳວ່າ ການບູຊາຫຼັກການຂອງຕົນ ເປັນເລື້ອງແທ້ຈິງ ອະທິບາຍວ່າ ການບູຊາຫຼັກການຂອງຕົນ ເປັນແນວໃດ? ຄື ບຸກຄົນສັກກາຣະ ເຄົາລົບ ນັບຖື ບູຊາສາດສະດາຂອງຕົນວ່າ "ສາດສະດານີ້ ເປັນສັບພັນຍູ" ນີ້ຊື່ວ່າການບູຊາຫຼັກການຂອງຕົນ ບຸກຄົນຍ່ອມສັກກາຣະເຄົາ ລົບ ນັບຖືບູຊາທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກ ຂອງຕົນວ່າ "ມັກນີ້ເປັນທາງນຳສັດອອກຈາກທຸກ" ນີ້ຊື່ວ່າການບູຊາຫຼັກການຂອງຕົນ

ຄຳວ່າ ການບູຊາຫຼັກການຂອງຕົນ ເປັນເລື້ອງແທ້ຈິງ ອະທິບາຍວ່າ ການບູຊາຫຼັກການຂອງຕົນ ເປັນເລື້ອງແທ້ຈິງ ຄື ແທ້ ເປັນຈິງ ແນ່ນອນ ບໍ່ວິປະຣິດ ລວມຄວາມວ່າການບູຊາຫຼັກການຂອງຕົນ ເປັນເລື້ອງແທ້ຈິງ

ຄຳວ່າ ເໝືອນພວກສະມະນະພາມພາກັນສັນເສີນແນວທາງຂອງຕົນ ອະທິບາຍວ່າ ທຳຊື່ວ່າ ແນວທາງຂອງຕົນ ທິດຖິ ຊື່ວ່າແນວທາງຂອງຕົນ ປະຕິປະທາ ຊື່ວ່າ ແນວທາງຂອງຕົນ ມັກ ກໍຊື່ວ່າແນວທາງຂອງຕົນ ພວກສະມະນະພາມພາກັນສັນເສີນ ຄື ຊົມເຊີຍ ຍ້ອງຍໍ ພັນນາແນວທາງຂອງຕົນ ລວມຄວາມວ່າ ເໝືອນພວກສະມະນະພາມພາກັນສັນເສີນແນວທາງຂອງຕົນ

ຄຳວ່າ ການວ່າຮ້າຍທຸກຢ່າງກໍເພິ່ງມີຢູ່ແທ້ຈິງ ອະທິບາຍວ່າ ການວ່າຮ້າຍທຸກຢ່າງກໍເພິ່ງມີຢູ່ແທ້ຈິງ ຄື ແທ້ ເປັນຈິງ ແນ່ນອນ ບໍ່ວິປະຣິດ ລວມຄວາມວ່າ ການວ່າຮ້າຍທຸກຢ່າງກໍເພິ່ງມີຢູ່ແທ້ຈິງ

ຄຳວ່າ ຍ້ອນຄວາມມົດຈົດຂອງສະມະນະພາມເຫຼົ່ານັ້ນ ເປັນເລື້ອງສະເພາະຕົນເທົ່ານັ້ນ ອະທິບາຍວ່າ ຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຂອງສະມະນະພາມເຫຼົ່ານັ້ນ ເປັນເລື້ອງສະເພາະຕົນເທົ່ານັ້ນລວມຄວາມວ່າ ຍ້ອນຄວາມມົດຈົດຂອງສະມະນະພາມເຫຼົ່ານັ້ນ ເປັນເລື້ອງສະເພາະຕົນເທົ່ານັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ການບູຊາຫຼັກການຂອງຕົນເປັນເລື້ອງແທ້ຈິງ
ເໝືອນພວກສະມະນະພາມພາກັນສັນເສີນແນວທາງຂອງຕົນ

ການວ່າຮ້າຍທຸກຢ່າງກໍເພິ່ງມີຢູ່ແທ້ຈິງ
ຍ້ອນຄວາມມິດຈິດຂອງສະມະນະພາມເຫຼົ່ານັ້ນ
ເປັນເລື້ອງສະເພາະຕົນເທົ່ານັ້ນ

[໑໔໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍານທີ່ຜູ້ອື່ນເພິ່ງແນະນຳບໍ່ມີແກ່ພາມ
ຄວາມຕົກລົງໃຈແລ້ວຢຶດໝັ້ນໃນທຳທັງຫຼາຍກໍບໍ່ມີ
ຍ້ອນແນວນັ້ນ ພາມຈຶ່ງລ່ວງເລີຍການວິວາດທັງຫຼາຍໄດ້ແລ້ວ
ແທ້ຈິງ ພາມຍ່ອມບໍ່ເຫັນທຳອື່ນໂດຍຄວາມເປັນຂອງປະເສີດ

ຄຳວ່າ ບໍ່ ໃນຄຳວ່າ ຍານທີ່ຜູ້ອື່ນເພິ່ງແນະນຳບໍ່ມີແກ່ພາມ ເປັນຄຳປະຕິເສດ

ຄຳວ່າ ພາມ ອະທິບາຍວ່າ ຊື່ວ່າພາມ ຍ້ອນລອຍທຳ ໗ ປະການໄດ້ແລ້ວ ຯລຯ ບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ ບັນດິດຮຽກຜູ້ນັ້ນວ່າ ເປັນພາມ

ຄຳວ່າ ຍານທີ່ຜູ້ອື່ນເພິ່ງແນະນຳບໍ່ມີແກ່ພາມ ອະທິບາຍວ່າ ຄວາມເປັນຜູ້ມີຍານອັນບຸກຄົນອື່ນເພິ່ງແນະນຳ ບໍ່ມີແກ່ພາມ ຄື ພາມ ບໍ່ເປັນຜູ້ທີ່ຜູ້ອື່ນເພິ່ງແນະນຳ ບໍ່ດຳເນີນຕາມຜູ້ອື່ນ ບໍ່ມີຜູ້ອື່ນເປັນປັດໄຈ ບໍ່ເຖິງຄວາມກ່ຽວເນື່ອງກັບຜູ້ອື່ນ ຮູ້ ເຫັນບໍ່ຫຼົງ ຮູ້ຕົວ ມີສະຕິ ຍ່ອມຮູ້ ຍ່ອມເຫັນ ຄື ຄວາມເປັນຜູ້ມີຍານອັນບຸກຄົນອື່ນເພິ່ງແນະນຳ ບໍ່ມີແກ່ພາມ ຄື ພາມບໍ່ເປັນຜູ້ທີ່ຜູ້ອື່ນເພິ່ງແນະນຳ ບໍ່ດຳເນີນຕາມຜູ້ອື່ນ ບໍ່ມີຜູ້ອື່ນເປັນປັດໄຈ ບໍ່ເຖິງຄວາມກ່ຽວເນື່ອງກັບຜູ້ອື່ນ ຮູ້ ເຫັນບໍ່ຫຼົງ ຮູ້ຕົວ ມີສະຕິ ຍ່ອມຮູ້ ຍ່ອມເຫັນວ່າ "ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ" ຯລຯ ຄວາມເປັນຜູ້ມີຍານອັນບຸກຄົນອື່ນເພິ່ງແນະນຳ ບໍ່ມີແກ່ ພາມ ຄື ພາມບໍ່ເປັນຜູ້ທີ່ຜູ້ອື່ນເພິ່ງແນະນຳ ບໍ່ດຳເນີນຕາມຜູ້ອື່ນ ບໍ່ມີຜູ້ອື່ນເປັນປັດໄຈ ບໍ່ເຖິງຄວາມກ່ຽວເນື່ອງກັບຜູ້ອື່ນ ຮູ້ເຫັນ ບໍ່ຫຼົງ ຮູ້ຕົວ ມີສະຕິ ຍ່ອມຮູ້ ຍ່ອມເຫັນວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ" ລວມຄວາມວ່າ ຍານທີ່ຜູ້ອື່ນເພິ່ງແນະນຳບໍ່ມີແກ່ພາມ

ຄຳວ່າ ໃນທຳທັງຫຼາຍ ໃນຄຳວ່າ ຄວາມຕົກລົງໃຈແລ້ວຢຶດໝັ້ນໃນທຳທັງຫຼາຍກໍບໍ່ມີ ໄດ້ແກ່ທິດຖິ ໒໘

ຄຳວ່າ ຕົກລົງໃຈ ໄດ້ແກ່ ຕົກລົງໃຈ ຄື ພິຈາລະນາ ຕັດສິນ ຊີ້ຂາດ ທຽບຄຽງພິຈາລະນາ ເຮັດໃຫ້ກະຈ່າງແຈ້ງ ເຮັດໃຫ້ແຈ່ມແຈ້ງ

ຄຳວ່າ ຢຶດໝັ້ນ ໄດ້ແກ່ ຈັບໝັ້ນ ຢຶດໝັ້ນ ຖືໝັ້ນ ລວບຖື ລວມຖື ລວບລວມຖື ຄືຄວາມຖື ຄວາມຢຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອວ່າ "ສິ່ງນີ້ ຈິງ ແທ້ຈິງ ເປັນຈິງ ແນ່ນອນ ບໍ່ວິປະຣິດ" ບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ໄດ້ແກ່ ຄວາມຕົກລົງໃຈແລ້ວຢຶດໝັ້ນ ພາມນັ້ນ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນ

ບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ຄວາມຕົກລົງໃຈແລ້ວຍຶດໝັ້ນໃນທຳທັງຫຼາຍກໍບໍ່ມີ

ຄຳວ່າ ຍ້ອນແນວນັ້ນ ໃນຄຳວ່າ ຍ້ອນເຫດນັ້ນ ພາມຈຶ່ງລ່ວງເລີຍການວິວາດທັງຫຼາຍໄດ້ແລ້ວ ອະທິບາຍວ່າ ຍ້ອນເຫດນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ພາມຈຶ່ງລ່ວງເລີຍ ຄື ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນການຜິດຖຽງຍ້ອນທິດຖິ ການໝງງໃຈຍ້ອນທິດຖິ ການຍາດແຍ່ງຍ້ອນທິດຖິ ການວິວາດຍ້ອນທິດຖິ ການມຸ້ງຮ້າຍຍ້ອນທິດຖິ ລວມຄວາມວ່າ ຍ້ອນເຫດນັ້ນ ພາມຈຶ່ງລ່ວງເລີຍການວິວາດທັງຫຼາຍໄດ້

ຄຳວ່າ ແທ້ຈິງ ພາມຍ່ອມບໍ່ເຫັນທຳອື່ນໂດຍຄວາມເປັນຂອງປະເສີດອະທິບາຍວ່າ ພາມຍ່ອມບໍ່ເຫັນ ຄື ບໍ່ແນມເຫັນ ບໍ່ກວດເບິ່ງ ບໍ່ເພ່ງພິນິດ ບໍ່ພິຈາລະນາເຫັນສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກ ອື່ນ ຄື ທຳອື່ນນອກຈາກສະຕິປັດຖານສຳມັບປະທານ ອິດທິບາດ ອິນຊີ ພະລະ ໂພດຊົງ ອະຣິຍະມັກມີອົງ ໘ ວ່າ ເປັນທຳເລີດ ປະເສີດ ຄື ວິເສດ ນຳໜ້າ ສູງສຸດ ປະເສີດສຸດ

ລວມຄວາມວ່າ ແທ້ຈິງ ພາມຍ່ອມບໍ່ເຫັນທຳອື່ນໂດຍຄວາມເປັນຂອງປະເສີດດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຍານທີ່ຜູ້ອື່ນເພິ່ງແນະນຳບໍ່ມີແກ່ພາມ
ຄວາມຕົກລົງໃຈແລ້ວຍຶດໝັ້ນໃນທຳທັງຫຼາຍກໍບໍ່ມີ
ຍ້ອນແນວນັ້ນ ພາມຈຶ່ງລ່ວງເລີຍການວິວາດທັງຫຼາຍໄດ້ແລ້ວ
ແທ້ຈິງ ພາມຍ່ອມບໍ່ເຫັນທຳອື່ນໂດຍຄວາມເປັນຂອງປະເສີດ

[໑໔໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສະມະນະພາມບາງພວກເຊື່ອຄວາມບໍລິສຸດ
ຍ້ອນທິດຖິວ່າ ເຮົາຮູ້ ເຮົາເຫັນຄວາມບໍລິສຸດນີ້ວ່າມີຈິງ
ຖ້າສະມະນະພາມຜູ້ໜຶ່ງໄດ້ເຫັນແລ້ວ ຈະມີປະໂຫຍດອັນໃດ
ດ້ວຍການເຫັນນັ້ນແກ່ສະມະນະພາມນັ້ນນໍ
ພວກສະມະນະພາມແລ່ນຜ່ານເລີຍ (ທາງແຫ່ງຄວາມບໍລິສຸດ) ແລ້ວ
ຍ່ອມກ່າວຄວາມບໍລິສຸດດ້ວຍການເຫັນອື່ນ

ຄຳວ່າ ເຮົາຮູ້ ໃນຄຳວ່າ ເຮົາຮູ້ ເຮົາເຫັນຄວາມບໍລິສຸດນີ້ວ່າມີຈິງ ໄດ້ແກ່ ເຮົາຮູ້ດ້ວຍປະຣະຈິດຕະຍານ (ຍານເປັນເຄື່ອງຮູ້ໃຈຜູ້ອື່ນ) ແດ່ ຮູ້ດ້ວຍປຸບເພນິວາສານຸດສະຕິຍານ (ຍານເປັນເຄື່ອງຣະນຶກເຖິງຂັນທີ່ຢູ່ອາໄສໃນການກ່ອນ) ແດ່

ຄຳວ່າ ເຮົາເຫັນ ໄດ້ແກ່ ເຮົາເຫັນດ້ວຍມັງສະຈັກຂຸແດ່ ດ້ວຍທິບພະຈັກຂຸແດ່

ຄຳວ່າ ຄວາມບໍລິສຸດນີ້ວ່າມີຈິງ ໄດ້ແກ່ ຄວາມບໍລິສຸດນີ້ມີແທ້ຈິງ ແທ້ ເປັນຈິງ ແນ່ນອນ ບໍ່ວິປະຣິດ ລວມຄວາມວ່າ ເຮົາຮູ້ ເຮົາເຫັນຄວາມບໍລິສຸດນີ້ວ່າມີຈິງ

ຄຳວ່າ ສະມະນະພາມບາງພວກເຊື່ອຄວາມບໍລິສຸດຍ້ອນທິດຖິ ອະທິບາຍວ່າສະມະນະພາມບາງພວກເຊື່ອຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນທິດຖິ ຄື ສະມະນະພາມບາງພວກເຊື່ອຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນທິດຖິວ່າ "ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ"

ສະມະນະພາມບາງພວກ ເຊື່ອຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍຣິສຸດຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນທິດຖິວ່າ "ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ" ລວມຄວາມວ່າ ສະມະນະພາມບາງພວກເຊື່ອຄວາມບໍລິສຸດຍ້ອນທິດຖິ

ຄຳວ່າ ໄດ້ເຫັນແລ້ວ ໃນຄຳວ່າ ຖ້າສະມະນະພາມຜູ້ໜຶ່ງໄດ້ເຫັນແລ້ວ ຈະມີປະໂຫຍດອັນໃດດ້ວຍການເຫັນນັ້ນ ແກ່ສະມະນະພາມນັ້ນນໍ ອະທິບາຍວ່າ ໄດ້ເຫັນແລ້ວດ້ວຍປະຣະຈິດຕະຍານແດ່ ໄດ້ເຫັນແລ້ວດ້ວຍປຸບເພນິວາສານຸດສະຕິຍານແດ່ ໄດ້ເຫັນແລ້ວດ້ວຍມັງສະຈັກຂຸແດ່ ໄດ້ເຫັນແລ້ວດ້ວຍທິບພະຈັກຂຸແດ່ ລວມຄວາມວ່າ ຖ້າສະມະນະພາມຜູ້ໜຶ່ງໄດ້ເຫັນແລ້ວ

ຄຳວ່າ ຈະມີປະໂຫຍດອັນໃດດ້ວຍການເຫັນນັ້ນ ແກ່ສະມະນະພາມນັ້ນນໍອະທິບາຍວ່າ ສະມະນະພາມນັ້ນເຮັດຫຍັງໄດ້ຍ້ອນການເຫັນນັ້ນ ຄື ບໍ່ມີການກຳນົດຮູ້ທຸກບໍ່ມີການລະສະມຸໄທ ບໍ່ມີການຈະເລີນມັກ ບໍ່ມີການເຮັດໃຫ້ແຈ້ງຜົນ ບໍ່ມີການລະຣາຄະໄດ້ໂດຍຕັດຂາດ ບໍ່ມີການລະໂທສະໄດ້ໂດຍຕັດຂາດ ບໍ່ມີການລະໂມຫະໄດ້ໂດຍຕັດຂາດ ບໍ່ມີການລະກິເລດທັງຫຼາຍໄດ້ໂດຍຕັດຂາດ ບໍ່ມີການຕັດຂາດສັງສາຣະວັດເລີຍ ລວມຄວາມວ່າ ຖ້າສະມະນະພາມຜູ້ໜຶ່ງໄດ້ເຫັນແລ້ວ ຈະມີປະໂຫຍດອັນໃດດ້ວຍການເຫັນນັ້ນແກ່ສະມະນະພາມນັ້ນນໍ

ຄຳວ່າ ພວກສະມະນະພາມແລ່ນຜ່ານ (ທາງແຫ່ງຄວາມບໍລິສຸດ) ແລ້ວ ຍ່ອມກ່າວຄວາມບໍລິສຸດດ້ວຍການເຫັນອື່ນ ອະທິບາຍວ່າ ເດຍຣະຖີເຫຼົ່ານັ້ນກ້າວລ່ວງ ກ້າວພົ້ນ ລ່ວງພົ້ນທາງແຫ່ງຄວາມບໍລິສຸດ ທາງແຫ່ງຄວາມສະອາດ ທາງແຫ່ງຄວາມບໍລິສຸດ ທາງແຫ່ງຄວາມຜ່ອງແຜ້ວ ທາງແຫ່ງຄວາມຜ່ອງໃສ ຍ່ອມກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງ ຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປນອກຈາກສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ລວມຄວາມວ່າ ພວກສະມະນະພາມແລ່ນເລີຍ (ທາງແຫ່ງຄວາມບໍລິສຸດ) ແລ້ວ ຍ່ອມກ່າວຄວາມບໍລິສຸດດ້ວຍການເຫັນອື່ນ

ອີກໄນໜຶ່ງ ພຣະພຸດທະເຈົ້າ ພຣະພຸດທະສາວົກແລະພຣະປັດເຈກພຸດທະເຈົ້າ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນທາງແຫ່ງຄວາມບໍ່ມົດຈົດ ທາງແຫ່ງຄວາມບໍ່ສະອາດ ທາງແຫ່ງຄວາມບໍ່ບໍລິສຸດ ທາງແຫ່ງຄວາມບໍ່ຜ່ອງແຜ້ວ ທາງແຫ່ງຄວາມບໍ່ຜ່ອງໃສຂອງເດຍຣະຖີເຫຼົ່ານັ້ນຍ່ອມກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ດ້ວຍສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ລວມຄວາມວ່າພວກສະມະນະພາມແລ່ນຜ່ານ (ທາງແຫ່ງຄວາມມົດຈົດ) ແລ້ວ ຍ່ອມກ່າວຄວາມມົດຈົດດ້ວຍການເຫັນອື່ນ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສະມະນະພາມບາງພວກເຊື່ອຄວາມມົດຈົດ
ຍ້ອນທິດຖີວ່າ ເຮົາຮູ້ ເຮົາເຫັນຄວາມມົດຈົດນີ້ວ່າມີຈິງ
ຖ້າສະມະນະພາມຜູ້ໜຶ່ງໄດ້ເຫັນແລ້ວ ຈະມີປະໂຫຍດອັນໃດ
ດ້ວຍການເຫັນນັ້ນແກ່ສະມະນະພາມນັ້ນບໍ
ພວກສະມະນະພາມແລ່ນເລີຍ (ທາງແຫ່ງຄວາມມົດຈົດ) ແລ້ວ
ຍ່ອມກ່າວຄວາມມົດຈົດດ້ວຍການເຫັນອື່ນ

[໑໘໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນໍຣະຊົນເມື່ອເຫັນຍ່ອມເຫັນນາມຮູບ
ຫຼື ເມື່ອເຫັນແລ້ວ ກໍຮູ້ຈັກສະເພາະນາມຮູບເຫຼົ່ານັ້ນເທົ່ານັ້ນ
ນໍຣະຊົນເຫັນນາມຮູບຫຼາຍແດ່ໜ້ອຍແດ່ສ່ວນຫຼາຍ
ເຖິງຢ່າງນັ້ນ ຜູ້ສະຫຼາດທັງຫຼາຍກໍບໍ່ກ່າວຄວາມມົດຈົດນັ້ນ
ຍ້ອນການເຫັນນາມຮູບນັ້ນ

ຄຳວ່າ ນໍຣະຊົນເມື່ອເຫັນ ໃນຄຳວ່າ ນໍຣະຊົນເມື່ອເຫັນຍ່ອມເຫັນນາມຮູບ ອະທິບາຍວ່າ ນໍຣະຊົນເມື່ອເຫັນດ້ວຍປະຣະຈິດຕະຍານແດ່ ເມື່ອເຫັນດ້ວຍປຸບເພນິວາສານຸດສະຕິຍານແດ່ ເມື່ອເຫັນດ້ວຍມັງສະຈັກຂຸແດ່ ເມື່ອເຫັນດ້ວຍທິບພະຈັກຂຸແດ່ ກໍເຫັນນາມຮູບນັ້ນເອງ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນສຸກ ໂດຍຄວາມເປັນຕົວຕົນ ບໍ່ໄດ້ເຫັນຄວາມເກີດ ຄວາມດັບ ຄຸນໂທດ ຫຼື ການສະລັດອອກແຫ່ງທຳເຫຼົ່ານັ້ນເລີຍ ລວມຄວາມວ່າ ນໍຣະຊົນເມື່ອເຫັນຍ່ອມເຫັນນາມຮູບ

ຄຳວ່າ ເມື່ອເຫັນແລ້ວ ໃນຄຳວ່າ ຫຼື ເມື່ອເຫັນແລ້ວ ກໍຮູ້ຈັກສະເພາະນາມຮູບເຫຼົ່ານັ້ນເທົ່ານັ້ນ ອະທິບາຍວ່າ ເມື່ອເຫັນແລ້ວດ້ວຍປະຣະຈິດຕະຍານແດ່ ເຫັນແລ້ວດ້ວຍປຸບເພນິວາສານຸດສະຕິຍານແດ່ ເຫັນແລ້ວດ້ວຍມັງສະຈັກຂຸແດ່ ເຫັນແລ້ວດ້ວຍທິບພະຈັກຂຸແດ່ ເມື່ອເຫັນພຽງ

ນາມຮູບນັ້ນເອງແລ້ວ ກໍຮູ້ຈັກໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນສຸກ ໂດຍຄວາມເປັນຕົວຕົນ ບໍ່ໄດ້ຮູ້ຈັກຄວາມເກີດ ຄວາມດັບ ຄຸນໂທດ ຫຼື ການສະລັດອອກແຫ່ງທຳເຫຼົ່ານັ້ນເລີຍ ລວມຄວາມວ່າ ຫຼື ເມື່ອເຫັນແລ້ວ ກໍຮູ້ຈັກສະເພາະນາມຮູບເຫຼົ່ານັ້ນເທົ່ານັ້ນ

ຄຳວ່າ ນໍຣະຊົນເຫັນນາມຮູບຫຼາຍແດ່ໜ້ອຍແດ່ໂດຍແທ້ ໄດ້ແກ່ ເຫັນນາມຮູບຫຼາຍແດ່ໜ້ອຍແດ່ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນສຸກ ໂດຍຄວາມເປັນຕົວຕົນໂດຍແທ້ ລວມຄວາມວ່າ ນໍຣະຊົນເຫັນນາມຮູບຫຼາຍແດ່ໜ້ອຍແດ່ໂດຍແທ້

ຄຳວ່າ ຜູ້ສະຫຼາດທັງຫຼາຍ ໃນຄຳວ່າ ເຖິງຢ່າງນັ້ນ ຜູ້ສະຫຼາດທັງຫຼາຍກໍບໍ່ກ່າວຄວາມມົດຈົດຍ້ອນການເຫັນນາມຮູບນັ້ນ ອະທິບາຍວ່າ ຜູ້ສະຫຼາດໃນຂັນ ຜູ້ສະຫຼາດໃນທາດຜູ້ສະຫຼາດໃນອາຍະຕະນະ ຜູ້ສະຫຼາດໃນປະຕິດຈະສະມຸບບາດ ຜູ້ສະຫຼາດໃນສະຕິປັດຖານ ຜູ້ສະຫຼາດໃນສຳມັບປະທານ ຜູ້ສະຫຼາດໃນອິດທິບາດ ຜູ້ສະຫຼາດໃນອິນຊີ ຜູ້ສະຫຼາດໃນພະລະ ຜູ້ສະຫຼາດໃນໂພດຊົງ ຜູ້ສະຫຼາດໃນມັກ ຜູ້ສະຫຼາດໃນຜົນ ຜູ້ສະຫຼາດໃນນິບພານ ຜູ້ສະຫຼາດເຫຼົ່ານັ້ນ ບໍ່ກ່າວບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນການເຫັນນາມຮູບ ດ້ວຍປະຣະຈິດຕະຍານແດ່ດ້ວຍປຸບເພນິວາສານຸດສະຕິຍານແດ່ ດ້ວຍມັງສະຈັກຂຸແດ່ ດ້ວຍທິບພະຈັກຂຸແດ່ ລວມຄວາມວ່າ ເຖິງຢ່າງນັ້ນ ຜູ້ສະຫຼາດທັງຫຼາຍກໍບໍ່ກ່າວຄວາມມົດຈົດຍ້ອນການເຫັນນາມຮູບນັ້ນດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ນໍຣະຊົນເມື່ອເຫັນຍ່ອມເຫັນນາມຮູບ
ຫຼືເມື່ອເຫັນແລ້ວ ກໍຮູ້ຈັກສະເພາະນາມຮູບເຫຼົ່ານັ້ນເທົ່ານັ້ນ
ນໍຣະຊົນເຫັນນາມຮູບຫຼາຍແດ່ໜ້ອຍແດ່ໂດຍແທ້
ເຖິງຢ່າງນັ້ນ ຜູ້ສະຫຼາດທັງຫຼາຍກໍບໍ່ກ່າວຄວາມມົດຈົດ
ຍ້ອນການເຫັນນາມຮູບນັ້ນ

[໑໔໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນໍຣະຊົນຜູ້ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ
ບໍ່ແມ່ນຄົນທີ່ໃຜເພິ່ງແນະນຳໄດ້ງ່າຍ ເປັນຜູ້ເຊີດຊູທິດຖິທີ່ກຳນົດໄວ້ແລ້ວ
ອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມຍ້ອນທິດຖິນັ້ນ
ນໍຣະຊົນນັ້ນຜູ້ກ່າວຄວາມມົດຈົດໄດ້ເຫັນວ່າແທ້ຈິງໃນທິດຖິນັ້ນ

ຄຳວ່າ ນໍຣະຊົນຜູ້ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ ບໍ່ແມ່ນຄົນທີ່ໃຜເພິ່ງແນະນຳໄດ້ງ່າຍ ອະທິບາຍວ່າ ນໍຣະຊົນຜູ້ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນວ່າ "ໂລກທ່ຽງ ນີ້ເທົ່ານັ້ນຈິງຢ່າງອື່ນເປັນໂມຄະ" ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນວ່າ "ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍ

ແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ”

ຄຳວ່າ ບໍ່ແມ່ນຄົນທີ່ໃຜເພິ່ງແນະນຳໄດ້ງ່າຍ ອະທິບາຍວ່າ ນໍຣະຊົນຜູ້ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ ເປັນຄົນທີ່ເພິ່ງແນະນຳໄດ້ຍາກ ເຮັດໃຫ້ເຂົ້າໃຈໄດ້ຍາກ ເຮັດໃຫ້ເພ່ງພິນິດໄດ້ຍາກ ເຮັດໃຫ້ພິຈາລະນາໄດ້ຍາກ ເຮັດໃຫ້ເຫຼື້ອມໃສໄດ້ຍາກ ລວມຄວາມວ່າ ນໍຣະຊົນຜູ້ມີປົກກະຕິກ່າວດ້ວຍ ຄວາມເຊື່ອໝັ້ນ ບໍ່ແມ່ນຄົນທີ່ໃຜເພິ່ງແນະນຳໄດ້ງ່າຍ

ຄຳວ່າ ເປັນຜູ້ເຊີດຊູທິດຖິທີ່ກຳນົດໄວ້ແລ້ວ ອະທິບາຍວ່າ ເປັນຜູ້ເຊີດຊູ ຄື ຫຼ່ງວຍ້ອງຍໍທິດຖິທີ່ກຳນົດແລ້ວ ກຳນົດໄວ້ແລ້ວ ຄື ປຸງແຕ່ງໄວ້ແລ້ວ ຕັ້ງໄວ້ດີແລ້ວ ມີທິດຖິເປັນທຸງໄຊ ມີທິດຖິເປັນຍອດທຸງ ມີທິດຖິເປັນໃຫຍ່ ຖືກທິດຖິຄອບງຳຫຼ່ງວໄປ ລວມຄວາມວ່າ ເປັນຜູ້ເຊີດຊູທິດຖິທີ່ກຳນົດໄວ້ແລ້ວ

ຄຳວ່າ ອາໄສສາດສະດາໃດ ໃນຄຳວ່າ ອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມຍ້ອນທິດຖິນັ້ນ ອະທິບາຍວ່າ ອາໄສ ຄື ອີງອາໄສ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈເຊື່ອສາດສະດາ ທຳທີ່ສາດສະດາກ່າວສອນ ໝູ່ຄະນະ ທິດຖິ ປະຕິປະທາ ມັກ ໃດ ລວມຄວາມວ່າອາໄສສາດສະດາໃດ

ຄຳວ່າ ຍ້ອນທິດຖິນັ້ນ ໄດ້ແກ່ ຍ້ອນທິດຖິຂອງຕົນ ຄື ຄວາມຖືກໃຈຂອງຕົນຄວາມພໍໃຈຂອງຕົນ ລັດທິຂອງຕົນ

ຄຳວ່າ ກໍກ່າວສາດສະດານັ້ນວ່າດີງາມ ໄດ້ແກ່ ກ່າວສາດສະດານັ້ນວ່າດີງາມ ຄື ກ່າວວ່າດີ ກ່າວວ່າເປັນບັນດິດ ກ່າວວ່າເປັນນັກປາດ ກ່າວວ່າມີຍານ ກ່າວວ່າ ມີເຫດຜົນ ກ່າວວ່າມີຄຸນລັກສະນະ ກ່າວວ່າເໝາະແກ່ເຫດ ກ່າວວ່າສົມຖານະ ຕາມລັດທິຂອງຕົນ ລວມຄວາມວ່າອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມຍ້ອນທິດຖິນັ້ນ

ຄຳວ່າ ຜູ້ກ່າວຄວາມບໍລິສຸດ ໃນຄຳວ່າ ນໍຣະຊົນນັ້ນຜູ້ກ່າວຄວາມບໍລິສຸດໄດ້ເຫັນວ່າ ແທ້ຈິງໃນທິດຖິນັ້ນ ອະທິບາຍວ່າ ກ່າວຄວາມບໍລິສຸດ ຄື ກ່າວຄວາມສະອາດ ກ່າວຄວາມບໍລິສຸດກ່າວຄວາມຜ່ອງແຜ້ວ ກ່າວຄວາມຜ່ອງໃສ ອີກໄນໜຶ່ງ ເປັນຜູ້ມີຄວາມເຫັນບໍລິສຸດ ຄື ເປັນຜູ້ມີຄວາມເຫັນສະອາດ ເປັນຜູ້ມີຄວາມເຫັນບໍລິສຸດ ເປັນຜູ້ມີຄວາມເຫັນຜ່ອງແຜ້ວ ເປັນຜູ້ມີຄວາມເຫັນຜ່ອງໃສ ລວມຄວາມວ່າ ຜູ້ກ່າວຄວາມບໍລິສຸດ

ຄຳວ່າ ໃນທິດຖິນັ້ນ ໄດ້ແກ່ ໃນທິດຖິຂອງຕົນ ຄື ຄວາມຖືກໃຈຂອງຕົນ ຄວາມພໍໃຈຂອງຕົນ ລັດທິຂອງຕົນ

ຄຳວ່າ ນໍຣະຊົນນັ້ນ ຯລຯ ໄດ້ເຫັນວ່າແທ້ຈິງ ອະທິບາຍວ່າ ໄດ້ເຫັນ ຄື ໄດ້ແນມເຫັນເບິ່ງເຫັນ ແທງຕະຫຼອດແລ້ວວ່າ ແທ້ຈິງ ຄືແທ້ ເປັນຈິງ ແນ່ນອນ ບໍ່ວິປະຣິດ ລວມຄວາມວ່ານໍ

ຣະຊົນນັ້ນຜູ້ກ່າວຄວາມມົດຈິດໄດ້ເຫັນວ່າແທ້ຈິງໃນທິດຖິນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກ ເຈົ້າຈຶ່ງຕັດວ່າ

ນໍຣະຊົນຜູ້ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ
ບໍ່ແມ່ນຄົນທີ່ໃຜເພິ່ງແນະນຳໄດ້ງ່າຍ ເປັນຜູ້ເຊີດຊູທິດຖິທີ່ກຳນົດໄວ້ແລ້ວ
ອາໄສສາດສະດາໃດ ກໍກ່າວສາດສະດານັ້ນວ່າດີງາມຍ້ອນທິດຖິນັ້ນ
ນໍຣະຊົນນັ້ນຜູ້ກ່າວຄວາມມົດຈິດໄດ້ເຫັນວ່າແທ້ຈິງໃນທິດຖິນັ້ນ

[໑໘໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພາມພິຈາລະນາແລ້ວຍ່ອມບໍ່ເຂົ້າເຖິງຄວາມກຳນົດ
ບໍ່ແລ່ນໄປດ້ວຍທິດຖິ ທັງບໍ່ຜູກພັນດ້ວຍຕັນຫາຫຼືທິດຖິຍ້ອນຍານ
ພາມນັ້ນເມື່ອຮູ້ແລ້ວກໍວາງເສີຍທິດຖິສົມມຸດທີ່ເກີດຈາກປຸຖຸຊົນ
ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ

ຄຳວ່າ ບໍ່ ໃນຄຳວ່າ ພາມຮູ້ແລ້ວຍ່ອມບໍ່ເຂົ້າເຖິງຄວາມກຳນົດ ເປັນຄຳປະຕິເສດ
ຄຳວ່າ ພາມ ອະທິບາຍວ່າ ຊື່ວ່າພາມ ຍ້ອນລອຍທຳ ໗ ປະການໄດ້ແລ້ວ ຯລຯ ບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ ບັນດິດຮຽກຜູ້ນັ້ນວ່າ ເປັນພາມຄຳວ່າ ຄວາມກຳນົດ ໄດ້ແກ່ ຄວາມກຳນົດ ໒ ຢ່າງ ຄື (໑) ຄວາມກຳນົດດ້ວຍອຳນາດຕັນຫາ (໒) ຄວາມກຳນົດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດທິດຖິ ຍານ ຕັດຮຽກວ່າ ເຄື່ອງພິຈາລະນາ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງາຍ ຄວາມໄຈ້ແຍກທຳ ສຳມາທິດຖິ

ຄຳວ່າ ພາມພິຈາລະນາແລ້ວຍ່ອມບໍ່ເຂົ້າເຖິງຄວາມກຳນົດ ອະທິບາຍວ່າພາມພິຈາລະນາແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແຈ້ງ ແຈ້ງແລ້ວເຮັດໃຫ້ແຈ່ມແຈ້ງແລ້ວວ່າ "ສັງຂານທັງປວງບໍ່ທ່ຽງ" ພາມພິຈາລະນາແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວພິຈາລະນາແລ້ວ ເຮັດໃຫ້ກະຈ່າງແຈ້ງ ແຈ້ງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ "ສັງຂານທັງປວງເປັນທຸກ ຯລຯ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ" ຍ່ອມບໍ່ເຖິງ ບໍ່ເຂົ້າເຖິງ ຄື ບໍ່ສົນໃຈ ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນຄວາມກຳນົດດ້ວຍອຳນາດຕັນຫາ ຫຼື ຄວາມກຳນົດດ້ວຍອຳນາດທິດຖິ ລວມຄວາມວ່າ ພາມພິຈາລະນາແລ້ວຍ່ອມບໍ່ເຂົ້າເຖິງຄວາມກຳນົດ

ຄຳວ່າ ບໍ່ແລ່ນໄປດ້ວຍທິດຖິ ທັງບໍ່ຜູກພັນດ້ວຍຕັນຫາ ຫຼື ທິດຖິຍ້ອນຍານ ອະທິບາຍວ່າ ທິດຖິ ໖໒ ພາມນັ້ນລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວຣະງັບໄດ້ແລ້ວ

ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ພາມນັ້ນ ບໍ່ໄປ ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປດ້ວຍທິດຖິ ທັງບໍ່ກັບໄປ ບໍ່ຫວນກັບໄປຫາທິດຖິນັ້ນ ໂດຍຄວາມເປັນສາຣະ ລວມຄວາມວ່າ ບໍ່ແລ່ນໄປດ້ວຍທິດຖິ

ຄຳວ່າ ທັງບໍ່ຜູກພັນດ້ວຍຕັນຫາ ຫຼື ທິດຖິຍ້ອນຍານ ອະທິບາຍວ່າ ບໍ່ກໍ່ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນເຊິ່ງຄວາມຜູກພັນດ້ວຍອຳນາດຕັນຫາ ຫຼື ຄວາມຜູກພັນດ້ວຍອຳນາດທິດຖິ ຍ້ອນຍານໃນສະມາບັດ ໘ ຍານໃນອະພິນຍາ ໕ ຫຼື ມິດສາຍານ ລວມຄວາມວ່າ ບໍ່ແລ່ນໄປດ້ວຍທິດຖິ ທັງບໍ່ຜູກພັນດ້ວຍຕັນຫາ ຫຼື ທິດຖິຍ້ອນຍານ

ຄຳວ່າ ເມື່ອຮູ້ແລ້ວ ໃນຄຳວ່າ ພາມນັ້ນເມື່ອຮູ້ແລ້ວ ຯລຯ ທິດຖິສົມມຸດທີ່ເກີດຈາກປຸຖຸຊົນ ອະທິບາຍວ່າ ເມື່ອຮູ້ແລ້ວ ຄື ເມື່ອຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວເຮັດໃຫ້ກະຈ່າງແຈ້ງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ “ສັງຂານທັງປວງບໍ່ທ່ຽງ” ເມື່ອຮູ້ແລ້ວ ຄື ເມື່ອຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແຈ້ງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ “ສັງຂານທັງປວງເປັນທຸກ ຯລຯ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ” ລວມຄວາມວ່າ ພາມນັ້ນເມື່ອຮູ້ແລ້ວທິດຖິ ໖໔ ຕັດຮຽກວ່າ ທິດຖິສົມມຸດ

ຄຳວ່າ ທີ່ເກີດຈາກປຸຖຸຊົນ ອະທິບາຍວ່າ ທິດຖິສົມມຸດເຫຼົ່ານັ້ນ ເກີດຈາກປຸຖຸຊົນຈຶ່ງຊື່ວ່າ ທີ່ເກີດຈາກປຸຖຸຊົນ ຫຼື ທິດຖິສົມມຸດເຫຼົ່ານັ້ນ ເກີດຈາກຊົນຕ່າງ ໆ ຫຼາກຫຼາຍ ຈຶ່ງຊື່ວ່າ ທີ່ເກີດຈາກປຸຖຸຊົນ ລວມຄວາມວ່າ ພາມນັ້ນເມື່ອຮູ້ແລ້ວ ຯລຯ ທິດຖິສົມມຸດທີ່ເກີດຈາກປຸຖຸຊົນ

ຄຳວ່າ ກໍວາງເສີຍ ຯລຯ ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ ອະທິບາຍວ່າສະມະນະພາມເຫຼົ່າອື່ນ ຖື ຢຶດໝັ້ນ ຖືໝັ້ນດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິສ່ວນພຣະອະຣະຫັນວາງເສີຍ ບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ລວມຄວາມວ່າ ກໍວາງເສີຍ ຯລຯ ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພາມພິຈາລະນາແລ້ວຍ່ອມບໍ່ເຂົ້າເຖິງຄວາມກຳນົດ
ບໍ່ແລ່ນໄປດ້ວຍທິດຖິ ທັງບໍ່ຜູກພັນດ້ວຍຕັນຫາຫຼືທິດຖິຍ້ອນຍານ
ພາມນັ້ນເມື່ອຮູ້ແລ້ວກໍວາງເສີຍທິດຖິສົມມຸດທີ່ເກີດຈາກປຸຖຸຊົນ
ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ

[໑໔໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີສະລັດກິເລດເຄື່ອງຮ້ອຍຮັດໃນໂລກນີ້ແລ້ວ
ເມື່ອຄົນເກີດວິວາດກັນແລ້ວ ກໍບໍ່ເຂົ້າໄປເປັນຝັກເປັນຝ່າຍ
ເມື່ອຄົນທັງຫຼາຍບໍ່ສະງົບ ມຸນີນັ້ນເປັນຜູ້ສະງົບ ວາງເສີຍ ບໍ່ຖືໝັ້ນ
ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ

ຄຳວ່າ ກິເລດເຄື່ອງຮ້ອຍຮັດ ໃນຄຳວ່າ ມຸນີສະລັດກິເລດເຄື່ອງຮ້ອຍຮັດໃນໂລກນີ້ແລ້ວ ໄດ້ແກ່ ກິເລດເຄື່ອງຮ້ອຍຮັດ ໔ ຢ່າງ ຄື

໑. ກິເລດເຄື່ອງຮ້ອຍຮັດກາຍຄືອະພິດຊາ
໒. ກິເລດເຄື່ອງຮ້ອຍຮັດກາຍຄືພະຍາບາດ
໓. ກິເລດເຄື່ອງຮ້ອຍຮັດກາຍຄືສີລັບພະຕະປະຣາມາດ
໔. ກິເລດເຄື່ອງຮ້ອຍຮັດກາຍຄືຄວາມຖືໝັ້ນວ່ານີ້ເທົ່ານັ້ນຈິງ

ຄວາມກຳໜັດໃນທິດຖິຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍ ຄື ອະພິດຊາຄວາມອາຄາດ ຄວາມບໍ່ພໍໃຈໃນວາທະຂອງຜູ້ອື່ນ ຊື່ວ່າ ກິເລດເຄື່ອງຮ້ອຍຮັດກາຍ ຄື ພະຍາບາດ ຄວາມຍຶດໝັ້ນສີນ ຂໍ້ວັດ ຫຼື ສີນຂໍ້ວັດຂອງຕົນ ຊື່ວ່າ ກິເລດເຄື່ອງຮ້ອຍຮັດກາຍ ຄື ສີລັບພະຕະປະຣາມາດ ທິດຖິຂອງຕົນ ຊື່ວ່າກິເລດເຄື່ອງຮ້ອຍຮັດກາຍ ຄື ອິທັງສັດຈາພິນິເວສະ

ຄຳວ່າ ສະລັດ ໄດ້ແກ່ ສະລະ ຫຼື ສະລັດກິເລດເຄື່ອງຮ້ອຍຮັດ ອີກໄນໜຶ່ງ ມຸນີແກ້ ຫຼື ສະລັດກິເລດເຄື່ອງຮ້ອຍຮັດ ຄື ກິເລດເຄື່ອງຜູກພັນ ທີ່ຮ້ອຍຮັດ ຮັດຄຶງ ຂ້ອງ ຕິດ ກ່ຽວ ກ່ຽວພັນ ເກາະຕິດ ຕິດແໜ້ນແລ້ວ ອະທິບາຍວ່າ ມຸນີສະລະ ຫຼື ສະລັດກິເລດເຄື່ອງຮ້ອຍຮັດເໝືອນຄົນຄັບລົດ ປ່ອຍລົດ ກວຽນ ຫຼື ລົດມີເຄື່ອງປະດັບ ຄື ໃຫ້ເຄື່ອນທີ່ໄປເອງສັນນັ້ນ

ອີກໄນໜຶ່ງ ມຸນີແກ້ ຫຼື ສະລັດກິເລດເຄື່ອງຮ້ອຍຮັດ ຄື ກິເລດເຄື່ອງຜູກພັນທີ່ຮ້ອຍຮັດ ຮັດຄຶງ ຂ້ອງ ຕິດ ກ່ຽວ ກ່ຽວພັນ ເກາະຕິດ ຕິດແໜ້ນແລ້ວ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ໃນໂລກນີ້ ໄດ້ແກ່ ໃນທິດຖິນີ້ ຯລຯ ມະນຸດໂລກນີ້ ລວມຄວາມວ່າ ມຸນີສະລັດກິເລດເຄື່ອງຮ້ອຍຮັດໃນໂລກນີ້ແລ້ວ

ຄຳວ່າ ເມື່ອຄົນເກີດວິວາດກັນແລ້ວ ກໍບໍ່ເຂົ້າໄປເປັນຝັກເປັນຝ່າຍ ອະທິບາຍວ່າ ເມື່ອຄົນເກີດວິວາດກັນແລ້ວ ຄື ເກີດຂຶ້ນແລ້ວ ບັງເກີດແລ້ວ ບັງເກີດຂຶ້ນແລ້ວ ຜາກົດແລ້ວໄດ້ແກ່ ເມື່ອຄົນທັງຫຼາຍ ເຖິງດ້ວຍສັນທາຄະຕິ ເຖິງດ້ວຍໂທສາຄະຕິ ເຖິງດ້ວຍໂມຫາຄະຕິ ເຖິງດ້ວຍພະຍາຄະຕິ ມຸນີນັ້ນ ຍ່ອມບໍ່ເຖິງສັນທາຄະຕິ ບໍ່ເຖິງໂທສາຄະຕິ ບໍ່ເຖິງໂມຫາຄະຕິ ບໍ່ເຖິງພະຍາຄະຕິ ຄື ບໍ່ດຳເນີນໄປຕາມອຳນາດຣາຄະ ບໍ່ດຳເນີນໄປຕາມອຳນາດໂທສະ ບໍ່ດຳເນີນໄປຕາມອຳນາດໂມຫະ ບໍ່ດຳເນີນໄປຕາມອຳນາດມານະ ບໍ່ດຳເນີນໄປຕາມອຳນາດທິດຖິ ບໍ່ດຳເນີນໄປຕາມອຳນາດອຸດທັດຈະ ບໍ່ດຳເນີນໄປຕາມອຳນາດວິຈິກິດສາ ບໍ່ດຳເນີນໄປຕາມອຳນາດອະນຸໄສ ໄດ້ແກ່ບໍ່ໄປ ຄື ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປ ດ້ວຍທຳທີ່ກໍ່ຄວາມເປັນຝັກເປັນຝ່າຍລວມຄວາມວ່າ ເມື່ອຄົນເກີດວິວາດກັນແລ້ວກໍບໍ່ເຂົ້າໄປເປັນຝັກເປັນຝ່າຍ

ຄຳວ່າ ເປັນຜູ້ສະງົບ ໃນຄຳວ່າ ເມື່ອຄົນທັງຫຼາຍບໍ່ສະງົບ ມຸນີນັ້ນ ເປັນຜູ້ສະງົບວາງເສີຍ ອະທິບາຍວ່າ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບຣາຄະ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບ ໂທສະ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບໂມຫະ ຯລຯ ຊື່ວ່າເປັນຜູ້ສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ຣະງັບໄດ້ແລ້ວ ຍ້ອນສະງົບ ຣະງັບ ສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບ ຣະງັບອະກຸສະລາພິສັງຂານທຸກປະເພດໄດ້ແລ້ວ ລວມຄວາມວ່າ ເປັນຜູ້ສະງົບ

ຄຳວ່າ ເມື່ອຄົນທັງຫຼາຍບໍ່ສະງົບ ອະທິບາຍວ່າ ເມື່ອຄົນທັງຫຼາຍ ບໍ່ສະງົບ ຄື ບໍ່ເຂົ້າໄປສະງົບ ບໍ່ສະງົບເຢັນ ບໍ່ດັບ ບໍ່ຣະງັບ ລວມຄວາມວ່າ ເມື່ອຄົນທັງຫຼາຍບໍ່ສະງົບ ມຸນີນັ້ນເປັນຜູ້ສະງົບ

ຄຳວ່າ ມຸນີນັ້ນ ຯລຯ ວາງເສີຍ ອະທິບາຍວ່າ ມຸນີຜູ້ເປັນພຣະອະຣະຫັນປະກອບດ້ວຍອຸເປກຂາມີອົງ ໖ ເຫັນຮູບທາງຕາແລ້ວ ກໍບໍ່ດີໃຈ ບໍ່ເສຍໃຈ ເປັນຜູ້ວາງເສີຍ ມີສະຕິສຳປະຊັນຍະຢູ່ ຟັງສຽງທາງຫູ ຯລຯ ເປັນຜູ້ອົບຮົມແລ້ວ ເປັນຜູ້ສະງົບ ຖ້າຢູ່ແຕ່ເວລາເທົ່ານັ້ນ ລວມຄວາມວ່າ ເມື່ອຄົນທັງຫຼາຍບໍ່ສະງົບ ມຸນີນັ້ນ ເປັນຜູ້ສະງົບ ຯລຯ ວາງເສີຍ

ຄຳວ່າ ບໍ່ຖືໝັ້ນ ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ ອະທິບາຍວ່າສະມະນະ ພາມເຫຼົ່າອື່ນ ຖື ຢຶດໝັ້ນ ຖືໝັ້ນດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິມຸນີຜູ້ເປັນພຣະອະຣະຫັນວາງເສີຍ ບໍ່ຖື ບໍ່ຢຶດໝັ້ນ ບໍ່ຖືໝັ້ນ ລວມຄວາມວ່າ ບໍ່ຖືໝັ້ນ ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີສະລັດກິເລດເຄື່ອງຮ້ອຍຮັດໃນໂລກນີ້ແລ້ວ
ເມື່ອຄົນເກີດວິວາດກັນແລ້ວ ກໍບໍ່ເຂົ້າໄປເປັນຝັກເປັນຝ່າຍ
ເມື່ອຄົນທັງຫຼາຍບໍ່ສະງົບ ມຸນີນັ້ນເປັນຜູ້ສະງົບ ວາງເສີຍ ບໍ່ຖືໝັ້ນ
ແຕ່ສະມະນະພາມເຫຼົ່າອື່ນພາກັນຖືໝັ້ນ

[໑໔໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີລະອາສະວະເກົ່າ ບໍ່ກໍ່ອາສະວະໃໝ່
ບໍ່ດຳເນີນໄປຕາມຄວາມພໍໃຈ
ທັງບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ
ມຸນີນັ້ນເປັນນັກປາດ ພົ້ນຂາດແລ້ວຈາກທິດຖິທັງຫຼາຍ
ຕິຕຽນຕົນເອງບໍ່ໄດ້ ບໍ່ຕິດຢູ່ໃນໂລກ

ຄຳວ່າ ມຸນີລະອາສະວະເກົ່າ ບໍ່ກໍ່ອາສະວະໃໝ່ ອະທິບາຍວ່າ ຮູບ ເວທະນາ ສັນຍາສັງຂານ ວິນຍານ ທີ່ເປັນອະດີດ ຕັດຮຽກວ່າ ອາສະວະເກົ່າ ກິເລດເຫຼົ່າໃດ ເພິ່ງເກີດຂຶ້ນຍ້ອນຜາ

ຮົບສັງຂານທີ່ເປັນອະດີດ ມຸນີລະ ຄື ສະລະ ສະລັດ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດເຫຼົ່ານັ້ນແລ້ວ ລວມຄວາມວ່າ ລະອາສະວະເກົ່າ

ຄໍາວ່າ ບໍ່ກໍ່ອາສະວະໃໝ່ ອະທິບາຍວ່າ ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ທີ່ເປັນປັດຈຸບັນ ຕັດຮຽກວ່າ ອາສະວະໃໝ່ ມຸນີບໍ່ກໍ່ຄວາມພໍໃຈ ບໍ່ກໍ່ຄວາມຮັກ ບໍ່ກໍ່ຄວາມກໍາໜັດຍ້ອນຜາຮົບສັງຂານທີ່ເປັນປັດຈຸບັນ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ລວມຄວາມວ່າ ມຸນີລະອາສະວະເກົ່າ ບໍ່ກໍ່ອາສະວະໃໝ່

ຄໍາວ່າ ບໍ່ດໍາເນີນໄປຕາມຄວາມພໍໃຈ ໃນຄໍາວ່າ ບໍ່ດໍາເນີນໄປຕາມຄວາມພໍໃຈທັງບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ ອະທິບາຍວ່າ ບໍ່ເຖິງສັນທາຄະຕິ ບໍ່ເຖິງໂທສາຄະຕິ ບໍ່ເຖິງໂມຫາຄະຕິ ບໍ່ເຖິງພະຍາຄະຕິ ຄື ບໍ່ດໍາເນີນໄປຕາມອໍານາດຣາຄະ ບໍ່ດໍາເນີນໄປຕາມອໍານາດໂທສະ ບໍ່ດໍາເນີນໄປຕາມອໍານາດໂມຫະ ບໍ່ດໍາເນີນໄປຕາມອໍານາດມານະ ບໍ່ດໍາເນີນໄປຕາມອໍານາດທິດຖິ ບໍ່ດໍາເນີນໄປຕາມອໍານາດອຸດທັດຈະ ບໍ່ດໍາເນີນໄປຕາມອໍານາດວິຈິກິດສາ ບໍ່ດໍາເນີນໄປຕາມອໍານາດອະນຸໄສ ໄດ້ແກ່ ບໍ່ໄປ ຄື ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນໍາໄປດ້ວຍທໍາທີ່ກໍ່ຄວາມເປັນຝັກເປັນຝ່າຍ ລວມຄວາມວ່າ ບໍ່ດໍາເນີນໄປຕາມຄວາມພໍໃຈ

ຄໍາວ່າ ທັງບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ ອະທິບາຍວ່າ ບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນວ່າ “ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ” ບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນວ່າ “ໂລກບໍ່ທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ”ລວມຄວາມວ່າ ບໍ່ດໍາເນີນໄປຕາມຄວາມພໍໃຈ ທັງບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ

ຄໍາວ່າ ມຸນີນັ້ນເປັນນັກປາດ ພົ້ນຂາດແລ້ວຈາກທິດຖິທັງຫຼາຍ ອະທິບາຍວ່າທິດຖິ ໖໒ ມຸນີນັ້ນລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ມຸນີນັ້ນພົ້ນຂາດແລ້ວ ຄື ບໍ່ກ່ຽວຂ້ອງກັບທິດຖິທັງຫຼາຍ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່

ຄໍາວ່າ ເປັນນັກປາດ ໄດ້ແກ່ ເປັນນັກປາດ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທໍາລາຍກິເລດ ລວມຄວາມວ່າ ມຸນີນັ້ນເປັນນັກປາດ ພົ້ນຂາດແລ້ວຈາກທິດຖິທັງຫຼາຍ

## ວ່າດ້ວຍເຫດທີ່ຕິຕຽນມີ ໔ ຢ່າງ

ຄໍາວ່າ ຕິຕຽນຕົນເອງບໍ່ໄດ້ ບໍ່ຕິດຢູ່ໃນໂລກ ອະທິບາຍວ່າ

ຄໍາວ່າ ຄວາມຕິດ ໄດ້ແກ່ ຄວາມຕິດ ໔ ຢ່າງ ຄື (໑) ຄວາມຕິດດ້ວຍອໍານາດຕັນຫາ(໔) ຄວາມຕິດດ້ວຍອໍານາດທິດຖິ ຯລຯ ນີ້ຊື່ວ່າຄວາມຕິດດ້ວຍອໍານາດຕັນຫາ ຯລຯ ນີ້ຊື່ວ່າຄວາມຕິດດ້ວຍອໍານາດທິດຖິມຸນີນັ້ນ ລະຄວາມຕິດດ້ວຍອໍານາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຕິດ

ດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມຕິດດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມຕິດດ້ວຍອຳນາດທິດຖິໄດ້ແລ້ວ ເປັນຜູ້ບໍ່ຖືກຕັນຫາ ແລະທິດຖິເຂົ້າໄປຕິດ ຈຶ່ງບໍ່ຕິດ ບໍ່ຕິດພັນ ບໍ່ເຂົ້າໄປຕິດ ໃນອະບາຍໂລກ ຯລຯ ມະນຸດໂລກ ຯລຯ ເທວະໂລກ ຯລຯ ຂັນທະໂລກ ຯລຯ ທາດໂລກ ຯລຯ ອາຍະຕະນະໂລກ ຄື ເປັນຜູ້ບໍ່ຕິດແລ້ວ ບໍ່ຕິດພັນແລ້ວ ບໍ່ເຂົ້າໄປຕິດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ຕິດຢູ່ໃນໂລກ

ຄຳວ່າ ຕິຕຽນຕົນເອງບໍ່ໄດ້ ອະທິບາຍວ່າ ມຸນີຍ່ອມຕິຕຽນຕົນຍ້ອນເຫດ ໒ ຢ່າງ ຄື (໑) ຍ້ອນເຮັດ (໒) ຍ້ອນບໍ່ເຮັດ ມຸນີຍ່ອມຕິຕຽນຕົນຍ້ອນເຮັດ ແລະຍ້ອນບໍ່ເຮັດ ເປັນແນວໃດ?ຄື ມຸນີຍ່ອມຕິຕຽນຕົນວ່າ "ເຮົາເຮັດກາຍທຸດຈະຣິດ ບໍ່ເຮັດກາຍສຸດຈະຣິດ ຯລຯ ເຮົາເຮັດວະຈີທຸດຈະຣິດ ຯລຯ ເຮົາເຮັດມະໂນທຸດຈະຣິດ ຯລຯ ເຮົາເຮັດປານາຕິບາດ ຯລຯ ເຮົາເຮັດມິດສາທິດຖິ ບໍ່ເຮັດສຳມາທິດຖິ" ມຸນີຊື່ວ່າ ຍ່ອມຕິຕຽນຕົນຍ້ອນເຮັດ ແລະຍ້ອນບໍ່ເຮັດ ເປັນແນວນີ້

ອີກໃນໜຶ່ງ ມຸນີຍ່ອມຕິຕຽນຕົນວ່າ "ເຮົາບໍ່ຮັກສາສີນໃຫ້ບໍລິບູນ ບໍ່ສັງລວມໃນອິນຊີທັງ ໖ ບໍ່ຮູ້ຈັກປະມານໃນການບໍຣິໂພກອາຫານ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ສະເໝີ ບໍ່ໝັ່ນປະກອບດ້ວຍສະຕິສຳປະຊັນຍະ ບໍ່ຈະເລີນສະຕິປັດຖານ ໔ ບໍ່ຈະເລີນສຳມັບປະທານ ໔ ບໍ່ຈະເລີນອິດທິບາດ ໔ ບໍ່ຈະເລີນອິນຊີ ໕ ບໍ່ຈະເລີນພະລະ ໕ ບໍ່ຈະເລີນໂພດຊົງ ໗ ບໍ່ຈະເລີນອະຣິຍະມັກມີອົງ ໘ ບໍ່ກຳນົດຮູ້ທຸກ ບໍ່ລະທຸກຂະສະມຸໄທ ບໍ່ຈະເລີນມັກ ບໍ່ເຮັດໃຫ້ແຈ້ງນິໂຣດ" ມຸນີຊື່ວ່າຍ່ອມຕິຕຽນຕົນຍ້ອນເຮັດ ແລະຍ້ອນບໍ່ເຮັດ ເປັນແນວນີ້ມຸນີບໍ່ເຮັດ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນເຊິ່ງກຳທີ່ຕິຕຽນຕົນ ຈຶ່ງຊື່ວ່າຕິຕຽນຕົນເອງບໍ່ໄດ້ ດ້ວຍອາການແນວນີ້ ລວມຄວາມວ່າ ຕິຕຽນຕົນເອງບໍ່ໄດ້ ບໍ່ຕິດຢູ່ໃນໂລກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີລະອາສະວະເກົ່າ ບໍ່ກໍ່ອາສະວະໃໝ່  
ບໍ່ດຳເນີນໄປຕາມຄວາມພໍໃຈ  
ທັງບໍ່ມີປົກກະຕິກ່າວດ້ວຍຄວາມເຊື່ອໝັ້ນ  
ມຸນີນັ້ນເປັນນັກປາດ ພົ້ນຂາດແລ້ວຈາກທິດຖິທັງຫຼາຍ  
ຕິຕຽນຕົນເອງບໍ່ໄດ້ ບໍ່ຕິດຢູ່ໃນໂລກ

[໑໔໙] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້ວ່າ)

ມຸນີນັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ  
ຄືຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ແນວໃດແນວໜຶ່ງ  
ມຸນີນັ້ນເປັນຜູ້ປົງພາຣະລົງແລ້ວ ພົ້ນຂາດແລ້ວ  
ບໍ່ມີຄວາມກຳນົດ ບໍ່ເຂົ້າໄປຍິນດີ ບໍ່ມີຄວາມປາຖະໜາ

ຄຳວ່າ ມຸນີນັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ແນວໃດແນວໜຶ່ງ ອະທິບາຍວ່າ ເສນາມານ ຕັດຮຽກວ່າ ເສນາ ກາຍທຸດຈະຣິດ ຊື່ວ່າເສນາມານ ວະຈີທຸດຈະຣິດ ຊື່ວ່າເສນາມານ ມະໂນທຸດຈະຣິດ ຊື່ວ່າເສນາມານ ຣາຄະ ฯລฯ ໂທສະ ฯລฯ ໂມຫະ ฯລฯ ໂກທະ ฯລฯ ອຸປະນາຫະ ฯລฯ ມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖຳພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯ ຄວາມຮ້ອນຮົນທຸກສະຖານ ฯລฯ ຄວາມເດືອດຮ້ອນທຸກປະການ ฯລฯ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າເສນາມານ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ກິເລດກາມເຮົາຮຽກວ່າເສນາກອງທີ ໑ ຂອງທ່ານ
ຄວາມບໍ່ຍິນດີເຮົາຮຽກວ່າເສນາກອງທີ ໒ ຂອງທ່ານ
ຄວາມຫິວກະຫາຍເຮົາຮຽກວ່າເສນາກອງທີ ໓ ຂອງທ່ານ
ຕັນຫາເຮົາຮຽກວ່າເສນາກອງທີ ໔ ຂອງທ່ານ
ຖີນະມິດທະເຮົາຮຽກວ່າເສນາກອງທີ ໕ ຂອງທ່ານ
ຄວາມຢ້ານເຮົາຮຽກວ່າເສນາກອງທີ ໖ ຂອງທ່ານ
ວິຈິກິດສາເຮົາຮຽກວ່າເສນາກອງທີ ໗ ຂອງທ່ານ
ມັກຂະແລະຖຳພະເຮົາຮຽກວ່າເສນາກອງທີ ໘ ຂອງທ່ານ
ລາບ ຄວາມສັນເສີນ ສັກກາຣະແລະຍົດທີ່ໄດ້ມາຜິດ ໆ
ເຮົາຮຽກວ່າເສນາກອງທີ ໙ ຂອງທ່ານ
ມານເອີຍ ເສນາຂອງທ່ານນີ້ ມີປົກກະຕິປະຫານຜູ້ມີທຳດຳ
ຄົນຢ້ານເອົາຊະນະເສນານັ້ນບໍ່ໄດ້
ແຕ່ຄົນກ້າ ເມື່ອຊະນະໄດ້ແລ້ວຍ່ອມໄດ້ຄວາມສຸກ

ເມື່ອໃດ ເສນາມານທັງໝົດ ແລະກິເລດທີ່ສ້າງເສນາຝ່າຍກົງກັນຂ້າມທັງປວງ ຖືກມຸນີພິຊິດແລະເຮັດໃຫ້ພ່າຍແພ້ ຖືກທຳລາຍ ກຳຈັດ ເຮັດໃຫ້ບໍ່ສູ້ໜ້າແລ້ວດ້ວຍອະຣິຍະມັກ ໔

ເມື່ອນັ້ນ ມຸນີນັ້ນຕັດຮຽກວ່າ ເປັນຜູ້ກຳຈັດເສນາ ຄື ເປັນຜູ້ກຳຈັດເສນາໃນຮູບທີ່ເຫັນ ກຳຈັດເສນາໃນສຽງທີ່ໄດ້ຍິນ ກຳຈັດເສນາໃນອາລົມທີ່ຮັບຮູ້ ແລະກຳຈັດເສນາໃນທຳມາຣົມທີ່ຮູ້ແຈ້ງແລ້ວ ລວມຄວາມວ່າ ມຸນີນັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ ຄື ຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ແນວໃດແນວໜຶ່ງ

## ວ່າດ້ວຍພາຣະ ໓ ຢ່າງ

ຄຳວ່າ ມຸນີນັ້ນ ເປັນຜູ້ປົງພາຣະລົງແລ້ວ ພົ້ນຂາດແລ້ວ ອະທິບາຍວ່າ

ຄຳວ່າ ພາຣະ ໄດ້ແກ່ ພາຣະ ໓ ຢ່າງ ຄື (໑) ຂັນທະພາຣະ (໒) ກິເລດພາຣະ (໓) ອະພິສັງຂານພາຣະ

ຂັນທະພາຣະ ເປັນແນວໃດ?

ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ໃນປະຕິສົນທິ ນີ້ຊື່ວ່າ ຂັນທະພາຣະ

ກິເລດພາຣະ ເປັນແນວໃດ?

ຄື ຣາຄະ ໂທສະ ໂມຫະ ຯລຯ ອະກຸສະລາພິສັງຂານທຸກປະເພດ ນີ້ຊື່ວ່າກິເລດພາຣະ

ອະພິສັງຂານພາຣະ ເປັນແນວໃດ?

ຄື ປຸນຍາພິສັງຂານ ອະປຸນຍາພິສັງຂານ ອາເນນຊາພິສັງຂານ ນີ້ຊື່ວ່າອະພິສັງຂານພາຣະ ເມື່ອໃດຂັນທະພາຣະ ກິເລດພາຣະ ແລະອະພິສັງຂານພາຣະ ມຸນີລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ເມື່ອນັ້ນ ມຸນີນັ້ນຕັດຮຽກວ່າ ເປັນຜູ້ປົງພາຣະລົງແລ້ວ ຄື ຜູ້ມີພາຣະຕົກໄປແລ້ວ ມີພາຣະອັນປົດແລ້ວ ມີພາຣະອັນປ່ອຍແລ້ວ ມີພາຣະອັນວາງແລ້ວ ມີພາຣະອັນຣະງັບແລ້ວ

## ວ່າດ້ວຍໂມເນີຍຍະທຳ ໓ ປະການ

ຄຳວ່າ ມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມໄຈ້ແຍກ ຄວາມສອດສ່ອງທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ ຢ່າງແຈ່ມແຈ້ງ ຄວາມຄິດຄົ້ນ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ປັນຍາເຄື່ອງເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ ປັນຍາປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງ ຄື ປັນຍາ ປັນຍາເໝືອນດວງປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜູ້ທີ່ປະກອບດ້ວຍຍານນັ້ນ ຊື່ວ່າມຸນີ ຄື ຜູ້ບັນລຸໂມນະຍານແລ້ວ ໂມເນີຍຍະທຳ ໓ ປະການ ຄື (໑) ໂມເນີຍຍະທຳທາງກາຍ (໒) ໂມເນີຍຍະທຳທາງວາຈາ (໓) ໂມເນີຍຍະທຳທາງໃຈ

ໂມເນີຍຍະທຳທາງກາຍ ເປັນແນວໃດ?

ຄື ການລະກາຍທຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍຍະທຳທາງກາຍ ກາຍສຸດຈະຣິດ ໓ ຢ່າງຊື່ວ່າໂມເນີຍຍະທຳທາງກາຍ ຍານມີກາຍເປັນອາລົມ ຊື່ວ່າໂມເນີຍຍະທຳທາງກາຍ ກາຍປະຣິນຍາ (ການກຳນົດຮູ້ກາຍ) ຊື່ວ່າໂມເນີຍຍະທຳທາງກາຍ ມັກ ທີ່ປະກອບດ້ວຍປະຣິນຍາ ຊື່ວ່າ

ໂມເນີຍຍະທຳທາງກາຍ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນກາຍ ຊື່ວ່າໂມເນີຍຍະທຳທາງກາຍ ຄວາມດັບແຫ່ງກາຍສັງຂານ ການບັນລຸຈະຕຸດຖະຊານຊື່ວ່າໂມເນີຍຍະທຳທາງກາຍ ນີ້ຊື່ວ່າໂມເນີຍຍະທຳທາງກາຍ

ໂມເນີຍຍະທຳທາງວາຈາ ເປັນແນວໃດ?

ຄື ການລະວະຈີທຸດຈະຣິດ ໔ ຢ່າງ ຊື່ວ່າໂມເນີຍຍະທຳທາງວາຈາ ວະຈີສຸດຈະຣິດ ໔ ຢ່າງຊື່ວ່າໂມເນີຍຍະທຳທາງວາຈາ ຍານມີວາຈາເປັນອາລົມ ຊື່ວ່າໂມເນີຍຍະທຳທາງວາຈາ ວາຈາປະຣິນຍາ (ການກຳນົດຮູ້ວາຈາ) ຊື່ວ່າໂມເນີຍຍະທຳທາງວາຈາ ມັກ ທີ່ປະກອບດ້ວຍປະຣິນຍາ ຊື່ວ່າໂມເນີຍຍະທຳທາງວາຈາ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນວາຈາ ຊື່ວ່າໂມເນີຍຍະທຳທາງວາຈາ ຄວາມດັບແຫ່ງວະຈີສັງຂານ ການບັນລຸທຸຕິຍະຊານຊື່ວ່າໂມເນີຍຍະທຳທາງວາຈາ ນີ້ຊື່ວ່າໂມເນີຍຍະທຳທາງວາຈາ

ໂມເນີຍຍະທຳທາງໃຈ ເປັນແນວໃດ?

ຄື ການລະມະໂນທຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍຍະທຳທາງໃຈ ມະໂນສຸດຈະຣິດ ໓ ຢ່າງຊື່ວ່າໂມເນີຍຍະທຳທາງໃຈ ຍານມີໃຈເປັນອາລົມ ຊື່ວ່າໂມເນີຍຍະທຳທາງໃຈ ຈິດຕະປະຣິນຍາ (ການກຳນົດຮູ້ຈິດ) ຊື່ວ່າໂມເນີຍຍະທຳທາງໃຈ ມັກ ທີ່ປະກອບດ້ວຍປະຣິນຍາຊື່ວ່າໂມເນີຍຍະທຳທາງໃຈ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຈິດ ຊື່ວ່າໂມເນີຍຍະທຳທາງໃຈ ຄວາມດັບແຫ່ງຈິດຕະສັງຂານ ການບັນລຸສັນຍາເວທະຍິຕະນິໂຣທະສະມາບັດຊື່ວ່າໂມເນີຍຍະທຳທາງໃຈ ນີ້ຊື່ວ່າໂມເນີຍຍະທຳທາງໃຈ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ບັນດິດທັງຫຼາຍ ຮຽກບຸກຄົນຜູ້ເປັນມຸນີທາງກາຍ
ເປັນມຸນີທາງວາຈາ ເປັນມຸນີທາງໃຈ ຜູ້ບໍ່ມີອາສະວະ
ວ່າເປັນມຸນີຜູ້ສົມບູນດ້ວຍໂມເນີຍຍະທຳ ລະກິເລດທັງປວງໄດ້
ບັນດິດທັງຫຼາຍ ຮຽກບຸກຄົນຜູ້ເປັນມຸນີທາງກາຍ
ເປັນມຸນີທາງວາຈາ ເປັນມຸນີທາງໃຈ ຜູ້ບໍ່ມີອາສະວະ
ວ່າເປັນມຸນີຜູ້ສົມບູນດ້ວຍໂມເນີຍຍະທຳ ລ້າງບາບໄດ້ແລ້ວ

ມຸນີຜູ້ປະກອບດ້ວຍໂມເນີຍຍະທຳ ໓ ປະການເຫຼົ່ານີ້ ມີ ໖ ຈຳພວກ ຄື

໑. ອາຄາຣະມຸນີ
໒. ອະນາຄາຣະມຸນີ
໓. ເສຂະມຸນີ
໔. ອະເສຂະມຸນີ
໕. ປັດເຈກະມຸນີ
໖. ມຸນີມຸນີ

ອາຄາຣະມຸນີ ເປັນແນວໃດ?

ຄື ບຸກຄົນຜູ້ຄອງເຮືອນ ເຫັນທາງ (ນິບພານ) ແລ້ວ ຮູ້ແຈ້ງຫຼັກຄຳສອນແລ້ວເຫຼົ່ານີ້ຊື່ວ່າ ອາຄາຣະມຸນີ

ອະນາຄາຣະມຸນີ ເປັນແນວໃດ?

ຄື ບຸກຄົນຜູ້ເປັນບັນພະຊິດ ເຫັນທາງ (ນິບພານ) ແລ້ວ ຮູ້ແຈ້ງຫຼັກຄຳສອນແລ້ວ ເຫຼົ່ານີ້ ຊື່ວ່າອະນາຄາຣະມຸນີ

ພຣະເສຂະ ໗ ຈຳພວກ ຊື່ວ່າ ເສຂະມຸນີ

ພຣະອະຣະຫັນທັງຫຼາຍ ຊື່ວ່າ ອະເສຂະມຸນີ

ພຣະປັດເຈກພຸດທະເຈົ້າທັງຫຼາຍ ຊື່ວ່າ ປັດເຈກະມຸນີ

ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າທັງຫຼາຍ ຊື່ວ່າ ມຸນີມຸນີ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

> ບຸກຄົນໂງ່ຈ້າບໍ່ຮູ້ອັນໃດ ພຽງແຕ່ນັ່ງນິ່ງ ໆ ບໍ່ຊື່ວ່າເປັນມຸນີເລີຍ
> ສ່ວນບຸກຄົນຜູ້ສະຫຼາດ ເລືອກຊັ່ງເອົາແຕ່ສິ່ງທີ່ດີ ລະຖິ້ມສິ່ງທີ່ຊົ່ວ
> ເໝືອນບຸກຄົນຊັ່ງສິ່ງຂອງ ຈຶ່ງຈະຊື່ວ່າ ເປັນມຸນີແທ້
> ຜູ້ທີ່ຮູ້ໂລກທັງ ໒ ກໍຮຽກວ່າ ເປັນມຸນີ (ຄືກັນ)
> ຜູ້ຮູ້ທຳທັງຂອງອະສັດຕະບຸຣຸດແລະສັດຕະບຸຣຸດ
> ທັງພາຍໃນແລະພາຍນອກ ໃນໂລກທັງປວງ
> ເທວະດາແລະມະນຸດບູຊາແລ້ວ ກ້າວລ່ວງກິເລດເຄື່ອງຂ້ອງ
> ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ພົ້ນຂາດແລ້ວ ອະທິບາຍວ່າ ຈິດຂອງມຸນີຫຼຸດ ພົ້ນ ຫຼຸດພົ້ນດີແລ້ວຈາກຣາຄະ ฯລฯ ຈິດຂອງມຸນີຫຼຸດ ພົ້ນ ຫຼຸດພົ້ນດີແລ້ວຈາກໂທສະ ฯລฯ ຈາກໂມຫະ ฯລฯ ຈາກອະກຸສະລາພິສັງ ຂານທຸກປະເພດ ລວມຄວາມວ່າ ມຸນີນັ້ນເປັນຜູ້ປົງພາຣະລົງແລ້ວ ພົ້ນຂາດແລ້ວ

ຄຳວ່າ ຄວາມກຳນົດ ໃນຄຳວ່າ ບໍ່ມີຄວາມກຳນົດ ບໍ່ເຂົ້າໄປຍິນດີ ບໍ່ມີຄວາມປາຖະໜາ ໄດ້ແກ່ ຄວາມກຳນົດ ໒ ຢ່າງ ຄື (໑) ຄວາມກຳນົດດ້ວຍອຳນາດຕັນຫາ

(໒) ຄວາມກຳນົດດ້ວຍອຳນາດທິດຖິ ฯລฯ ນີ້ຊື່ວ່າ ຄວາມກຳນົດດ້ວຍອຳນາດຕັນຫາ ฯລฯ ນີ້ຊື່ວ່າຄວາມກຳນົດດ້ວຍອຳນາດທິດຖິ ມຸນີນັ້ນລະຄວາມກຳນົດດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ມຸນີຈຶ່ງບໍ່ກຳນົດ ຄື ບໍ່ໃຫ້ເກີດ

ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນເຊິ່ງຄວາມກຳນົດດ້ວຍອຳນາດຕັນຫາ ຫຼື ຄວາມກຳນົດດ້ວຍອຳນາດທິດຖິ ລວມຄວາມວ່າ ບໍ່ມີຄວາມກຳນົດ

ຄຳວ່າ ບໍ່ເຂົ້າໄປຍິນດີ ອະທິບາຍວ່າ ພານປຸຖຸຊົນທຸກຈຳພວກຍ່ອມກຳໜັດ ພຣະເສຂະ ໗ ຈຳພວກ ລວມທັງກັນລະຍານະປຸຖຸຊົນຍ່ອມຍິນດີ ຍິນດີຍິ່ງ ຍິນດີສະເພາະເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ໄດ້ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ພຣະອະຣະຫັນເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງ ເພິ່ງມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ມີຄວາມກຳນົດ ບໍ່ເຂົ້າໄປຍິນດີ

ຄຳວ່າ ບໍ່ມີຄວາມປາຖະໜາ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມປາຖະໜາຄືຄວາມກຳໜັດ ຄວາມກຳໜັດແຮງກ້າ ໗ລ໗ ອະພິດຊາ ອະກຸສົນມູນຄືໂລພະ ຕັນຫາທີ່ຮຽກວ່າຄວາມປາຖະໜານີ້ ມຸນີໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ມຸນີນັ້ນຕັດຮຽກວ່າ ບໍ່ມີຄວາມປາຖະໜາ ອະທິບາຍຄຳວ່າ ພະຄະວາ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ
ອີກໄນໜຶ່ງ ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍຣາຄະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂທສະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂມຫະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍມານະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍທິດຖິໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍສ້ຽນໜາມໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍກິເລດໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງຈຳແນກ ແຍກແຍະ ແຈກແຈງທຳຣັດຕະນະ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງເຮັດທີ່ສຸດແຫ່ງພົບໄດ້
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມພຣະວໍຣະກາຍແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມສີນ ອົບຮົມຈິດ ອົບຮົມປັນຍາແລ້ວ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ສອຍເສນາສະນະທີ່ເປັນປ່າເລົ່າ ແລະປ່າທຶບອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມີສ່ວນແຫ່ງຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງອັດຖະຣົດ ທຳມະຣົດ ວິມຸດຕິຣົດ ອະທິສີນ ອະທິຈິດ ອະທິປັນຍາ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຊານ ໔ ອັບປະມັນຍາ ໔ ອະຣູບສະມາບັດ ໔ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງວິໂມກ ໘ ອະພິພາຍະຕະນະ ໘ ອະນຸປຸບພະວິຫາຣະສະມາບັດ ໙ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສັນຍາພາວະນາ ໑໐ ກະສິນສະມາບັດ ໑໐ ອານາປານະສະຕິສະມາທິ ອະສຸພະສະມາບັດ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຕະຖາຄົດພະລະຍານ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າພະນາມວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະ ຊະນົກຊົງຕັ້ງ ບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດແລະອຳມາດຕັ້ງ ບໍ່ແມ່ນພຣະຍາດ ແລະຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນວິໂມກຂັນຕິກະນາມ (ພຣະນາມໃນລຳດັບການບັນລຸອະຣະຫັດຕະຜົນ) ເປັນສັດສິກາບັນຍັດ (ບັນຍັດທີ່ເກີດຍ້ອນຊົງຮູ້ແຈ້ງອະຣະຫັດຕະຜົນ) ຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ພ້ອມກັບການບັນລຸພຣະສັບພັນຍຸຕະຍານທີ່ເຫງົ້າຕົ້ນໂພ

ລວມຄວາມວ່າ ບໍ່ມີຄວາມກຳນົດ ບໍ່ເຂົ້າໄປຍິນດີ ບໍ່ມີຄວາມປາຖະໜາດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີນັ້ນ ເປັນຜູ້ກຳຈັດເສນາໃນທຳທັງປວງ
ຄືຮູບທີ່ເຫັນ ສຽງທີ່ໄດ້ຍິນ ຫຼື ອາລົມທີ່ຮັບຮູ້ແນວໃດແນວໜຶ່ງ
ມຸນີນັ້ນເປັນຜູ້ປົງພາຣະລົງແລ້ວ ພົ້ນຂາດແລ້ວ
ບໍ່ມີຄວາມກຳນົດ ບໍ່ເຂົ້າໄປຍິນດີ ບໍ່ມີຄວາມປາຖະໜາ

**ມະຫາວິຍູຫະສຸດຕະນິດເທດທີ ໑໓ ຈົບ**

# ໑໔. ຕຸວະຕະກະສຸດຕະນິດເທດ

## ອະທິບາຍຕຸວະຕະກະສູດ

### ວ່າດ້ວຍພິກຂຸຜູ້ກຳຈັດບາບທຳໄດ້ທັນທີ

ພຣະສາຣີບຸດເຖຣະຈະກ່າວອະທິບາຍຕຸວະຕະກະສູດ ດັ່ງຕໍ່ໄປນີ້

[໑໕໐] (ພຣະພຸດທະເນຣະມິດທູນຖາມວ່າ)

ຂ້າພຣະອົງຂໍທູນຖາມພຣະອົງ
ຜູ້ຊົງເປັນເຜົ່າພັນພຣະອາທິດ ຜູ້ມີວິເວກ ມີສັນຕິບົດ
ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ວ່າ ພິກຂຸເຫັນແນວໃດ
ຈຶ່ງບໍ່ຖືໝັ້ນອັນໃດ ໆ ໃນໂລກ ດັບໄປ

### ວ່າດ້ວຍການຖາມ ໓ ຢ່າງ

ຄຳວ່າ ຂ້າພຣະອົງຂໍທູນຖາມພຣະອົງ ຜູ້ຊົງເປັນເຜົ່າພັນພຣະອາທິດ ອະທິບາຍວ່າ ຄຳວ່າ ທູນຖາມ ໄດ້ແກ່ ການຖາມ ໓ ຢ່າງ ຄື

໑. ການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ
໒. ການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ
໓. ການຖາມເພື່ອຕັດຄວາມສົງໄສ

ການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ ເປັນແນວໃດ?

ຄື ໂດຍປົກກະຕິລັກສະນະໃດ ຕົນຍັງບໍ່ຮູ້ ຍັງບໍ່ເຫັນ ຍັງບໍ່ໄດ້ທຽບຄຽງ ຍັງບໍ່ໄດ້ພິຈາລະນາ ຍັງບໍ່ໄດ້ເຮັດໃຫ້ກະຈ່າງແຈ້ງ ຍັງບໍ່ໄດ້ເຮັດໃຫ້ແຈ່ມແຈ້ງ ກໍຖາມບັນຫາເພື່ອຮູ້ ເພື່ອເຫັນເພື່ອທຽບຄຽງ ເພື່ອພິຈາລະນາ ເພື່ອເຮັດໃຫ້ລັກສະນະນັ້ນແຈ່ມແຈ້ງ ນີ້ຊື່ວ່າການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ ການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ ເປັນແນວໃດ?

ຄື ໂດຍປົກກະຕິລັກສະນະໃດ ຕົນຮູ້ ເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງແຈ້ງ ເຮັດໃຫ້ແຈ່ມແຈ້ງແລ້ວ ກໍຖາມບັນຫາ ເພື່ອທຽບຄຽງລັກສະນະນັ້ນກັບບັນດິດອື່ນ ນີ້ຊື່ວ່າການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ

ການຖາມເພື່ອຕັດຄວາມສົງໄສ ເປັນແນວໃດ?

ຄື ໂດຍປົກກະຕິບຸກຄົນເປັນຜູ້ແລ່ນໄປສູ່ຄວາມສົງໄສ ແລ່ນໄປສູ່ຄວາມເຄືອບແຄງເກີດຄວາມຄິດເປັນ ໒ ແງ່ວ່າ "ເປັນແນວນີ້ຫຼືບໍ່ນໍ ເປັນອັນໃດ ຫຼື ເປັນແນວໃດ?ນໍ" ເຂົາກໍຖາມບັນຫາ ເພື່ອຕັດຄວາມສົງໄສ ນີ້ຊື່ວ່າການຖາມເພື່ອຕັດຄວາມສົງໄສ ເຫຼົ່ານີ້ຊື່ວ່າການຖາມ ໕ ຢ່າງການຖາມອີກ ໓ ຢ່າງ ຄື

໑. ການຖາມຂອງມະນຸດ
໒. ການຖາມຂອງອະມະນຸດ
໓. ການຖາມຂອງຮູບເນຣະມິດ

ການຖາມຂອງມະນຸດ ເປັນແນວໃດ?

ຄື ພວກມະນຸດເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ທູນຖາມບັນຫາ ຄື ພວກພິກຂຸກໍທູນຖາມ ພິກຂຸນີກໍທູນຖາມ ອຸປາສົກກໍທູນຖາມ ອຸປາສິກາກໍທູນຖາມ ພຣະຣາຊາກໍທູນຖາມ ກະສັດກໍທູນຖາມ ພາມກໍທູນຖາມ ແພດກໍທູນຖາມ ສູດກໍທູນຖາມ ຄະລືຫັດກໍທູນຖາມ ບັນພະຊິດກໍທູນຖາມ ນີ້ຊື່ວ່າການຖາມຂອງມະນຸດ

ການຖາມຂອງອະມະນຸດ ເປັນແນວໃດ?

ຄື ພວກອະມະນຸດເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ທູນຖາມບັນຫາ ຄື ພວກນາດກໍທູນຖາມ ຄຸດກໍທູນຖາມ ຍັກກໍທູນຖາມ ອະສູນກໍທູນຖາມ ຄົນທັນກໍທູນຖາມທ້າວມະຫາຣາດກໍທູນຖາມ ພຣະອິນກໍທູນຖາມ ພຣະພົມກໍທູນຖາມ ເທວະດາກໍທູນຖາມນີ້ຊື່ວ່າການຖາມຂອງອະມະນຸດ

ການຖາມຂອງຮູບເນຣະມິດ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງເນຣະມິດພຣະຮູບໃດ ເຊິ່ງສຳເລັດດ້ວຍພຣະຫະໄທ ມີອະໄວຍະວະນ້ອຍໃຫຍ່ຄົບທຸກຢ່າງ ມີອິນຊີບໍ່ບົກຜ່ອງ ພຣະຮູບເນຣະມິດນັ້ນ ເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ກໍທູນຖາມບັນຫາ ພຣະຜູ້ມີພຣະພາກເຈົ້າຊົງວິສັດຊະນາ ນີ້ຊື່ວ່າການຖາມຂອງຮູບເນຣະມິດ ເຫຼົ່ານີ້ຊື່ວ່າການຖາມອີກ ໓ ຢ່າງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດຕົນ
໒. ການຖາມເພື່ອປະໂຫຍດຜູ້ອື່ນ
໓. ການຖາມເພື່ອປະໂຫຍດຕົນແລະຜູ້ອື່ນ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດໃນພົບປັດຈຸບັນ
໒. ການຖາມເພື່ອປະໂຫຍດໃນພົບໜ້າ
໓. ການຖາມເພື່ອປະໂຫຍດຢ່າງຍິ່ງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດທີ່ບໍ່ມີໂທດ
໒. ການຖາມເພື່ອປະໂຫຍດທີ່ປາສະຈາກກິເລດ
໓. ການຖາມເພື່ອປະໂຫຍດທີ່ຜຸດຜ່ອງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງອະດີດ
໒. ການຖາມເຖິງອະນາຄົດ
໓. ການຖາມເຖິງປັດຈຸບັນ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງເລື້ອງພາຍໃນ
໒. ການຖາມເຖິງເລື້ອງພາຍນອກ
໓. ການຖາມເຖິງເລື້ອງທັງພາຍໃນແລະພາຍນອກ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງກຸສົນທຳ
໒. ການຖາມເຖິງອະກຸສົນທຳ
໓. ການຖາມເຖິງອັບພະຍາກະຕະທຳ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງຂັນ
໒. ການຖາມເຖິງທາດ
໓. ການຖາມເຖິງອາຍະຕະນະ

ການຖາມອີກ ๓ ຢ່າງ ຄື

໑. ການຖາມເຖິງສະຕິປັດຖານ
໒. ການຖາມເຖິງສຳມັບປະທານະ
໓. ການຖາມເຖິງອິດທິບາດ

ການຖາມອີກ ๓ ຢ່າງ ຄື

໑. ການຖາມເຖິງອິນຊີ
໒. ການຖາມເຖິງພະລະ
໓. ການຖາມເຖິງໂພດຊົງ

ການຖາມອີກ ๓ ຢ່າງ ຄື

໑. ການຖາມເຖິງມັກ
໒. ການຖາມເຖິງຜົນ
໓. ການຖາມເຖິງນິບພານ

ຄຳວ່າ ຂ້າພຣະອົງຂໍທູນຖາມພຣະອົງ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມພຣະອົງ ຄື ທູນຂໍ ທູນອັນເຊີນ ທູນໃຫ້ປະກາດວ່າ "ຂໍໂຜດຕັດບອກຂໍ້ນັ້ນແກ່ຂ້າພຣະອົງເທີ້ນ" ລວມຄວາມວ່າ ຂ້າພຣະອົງຂໍທູນຖາມພຣະອົງ

ຄຳວ່າ ຜູ້ຊົງເປັນເຜົ່າພັນພຣະອາທິດ ອະທິບາຍວ່າ ພຣະສຸຣິຍະ ຕັດຮຽກວ່າ ພຣະອາທິດ ພຣະສຸຣິຍະຊື່ວ່າ ເປັນພຣະໂຄດົມໂດຍພຣະໂຄດ ແມ່ນພຣະຜູ້ມີພຣະພາກເຈົ້າກໍຊົງເປັນພຣະໂຄດົມໂດຍພຣະໂຄດ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງຜາກົດໂດຍໂຄດພຣະອາທິດ ຄື ຊົງເປັນເຜົ່າພັນໂດຍໂຄດພຣະອາທິດ ຍ້ອນແນວນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າຜູ້ຊົງເປັນເຜົ່າພັນພຣະອາທິດ ລວມຄວາມວ່າ ຂ້າພຣະອົງຂໍທູນຖາມພຣະອົງ ຜູ້ຊົງເປັນເຜົ່າພັນພຣະອາທິດ

## ວ່າດ້ວຍວິເວກ ๓ ຢ່າງ

ຄຳວ່າ ຜູ້ມີວິເວກ ມີສັນຕິບົດ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ
ຄຳວ່າ ວິເວກ ໄດ້ແກ່ ວິເວກ ๓ ຢ່າງ ຄື

໑. ກາຍວິເວກ
໒. ຈິດຕະວິເວກ
໓. ອຸປະທິວິເວກ

ກາຍວິເວກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ່ອມໃຊ້ສອຍເສນາສະນະທີ່ສະຫງັດ ຄື ປ່າ ເຫງົ້າຕົ້ນໄມ້ ພູເຂົາ ຮ່ອມພູ ລີບເຂົາ ປ່າຊ້າ ປ່າດົງດິບ ກາງແຈ້ງ ກອງເຟືອງ ແລະມີກາຍສະຫງັດຢູ່ ຄື ຍ່າງອົງດຽວ ຢືນອົງດຽວ ນັ່ງອົງດຽວ ນອນອົງດຽວ ເຂົ້າໝູ່ບ້ານບິນທະບາດອົງດຽວ ກັບອົງດຽວ ນັ່ງໃນບ່ອນລັບອົງດຽວ ອະທິຖານຈົງກົມອົງດຽວ ທ່ຽວໄປຢູ່ ເຄື່ອນໄຫວເປັນໄປ ລ້ຽງຊີວິດ ດຳເນີນໄປຍັງຊີວິດໃຫ້ດຳເນີນໄປອົງດຽວ ນີ້ຊື່ວ່າກາຍວິເວກ

ຈິດຕະວິເວກ ເປັນແນວໃດ?

ຄື ຜູ້ບັນລຸປະຖົມຊານຍ່ອມມີຈິດສະຫງັດຈາກນິວອນ ຜູ້ບັນລຸທຸຕິຍະຊານຍ່ອມມີຈິດສະຫງັດຈາກວິຕົກແລະວິຈານ ຜູ້ບັນລຸຕະຕິຍະຊານຍ່ອມມີຈິດສະຫງັດຈາກປິຕິ ຜູ້ບັນລຸຈະຕຸດຖະຊານຍ່ອມມີຈິດສະຫງັດຈາກສຸກ ແລະທຸກ ຜູ້ບັນລຸອາກາສານັນຈາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ ຜູ້ບັນລຸວິນຍານັນຈາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກອາກາສານັນຈາຍະຕະນະສັນຍາ ຜູ້ບັນລຸອາກິນຈັນຍາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກວິນຍານັນຈາຍະຕະນະສັນຍາ ຜູ້ບັນລຸເນວະສັນຍານາສັນຍາຍະຕະນະສະມາບັດ ຍ່ອມມີຈິດສະຫງັດຈາກອາກິນຈັນຍາຍະຕະນະສັນຍາ ຜູ້ເປັນພຣະໂສດາບັນ ຍ່ອມມີຈິດສະຫງັດຈາກສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ທິດຖານຸໄສ ວິຈິກິດສານຸໄສ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບສັກກາຍະທິດຖິເປັນຕົ້ນນັ້ນ ຜູ້ເປັນພຣະສະກະທາຄາມີ ຍ່ອມມີຈິດສະຫງັດຈາກການຣາຄະສັງໂຍດ ປະຕິຄະສັງໂຍດ ຢ່າງຫຍາບ ການຣາຄານຸໄສ ປະຕິຄານຸໄສ ຢ່າງຫຍາບ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບການຣາຄະສັງໂຍດເປັນຕົ້ນນັ້ນ ຜູ້ເປັນພຣະອະນາຄາມີ ຍ່ອມມີຈິດສະຫງັດຈາກການຣາຄະສັງໂຍດ ປະຕິຄະສັງໂຍດ ຢ່າງລະອຽດ ການຣາຄານຸໄສ ປະຕິຄານຸໄສ ຢ່າງລະອຽດ ແລະເຫຼົ່າກິເລດທີ່ຢູ່ໃນພວກດຽວກັບການຣາຄະສັງໂຍດເປັນຕົ້ນນັ້ນ ຜູ້ເປັນພຣະອະຣະຫັນ ຍ່ອມມີຈິດສະຫງັດຈາກຮູບຣາຄະ ອະຮູບຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ ອະວິດຊານຸໄສເຫຼົ່າກິເລດທີ່ຢູ່ໃນພວກດຽວກັບ ຮູບຣາຄະເປັນຕົ້ນນັ້ນ ແລະສັງຂານນິມິດທັງປວງໃນພາຍນອກ ນີ້ຊື່ວ່າຈິດຕະວິເວກ

ອຸປະທິວິເວກ ເປັນແນວໃດ?

ຄື ກິເລດກໍດີ ຂັນກໍດີ ອະພິສັງຂານກໍດີ ຕັດຮຽກວ່າ ອຸປະທິ ອະມະຕະນິບພານ ຕັດຮຽກວ່າ ອຸປະທິວິເວກ ຄື ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ນີ້ຊື່ວ່າ ອຸປະທິວິເວກ ກາຍວິເວກ ຍ່ອມມີແກ່ບຸກຄົນຜູ້ມີກາຍຫຼີກອອກແລ້ວ ຍິນດີໃນເນກຂຳມະ ຈິດຕະວິເວກ ຍ່ອມມີ

ແກ່ບຸກຄົນຜູ້ມີຈິດບໍລິສຸດ ເຖິງຄວາມເປັນຜູ້ຜ່ອງແຜ້ວຍິ່ງ ແລະອຸປະທິວິເວກ ຍ່ອມມີແກ່ ບຸກຄົນຜູ້ປາສະຈາກອຸປະທິ ບັນລຸນິບພານອັນປາສະຈາກປັດໄຈປຸງແຕ່ງແລ້ວ

ຄຳວ່າ ສັນຕິ ອະທິບາຍວ່າ ທັງສັນຕິ ແລະສັນຕິບົດ ມີຄວາມໝາຍຢ່າງດຽວກັນ ສັນຕິບົດນັ້ນ ໆເອງຄື ອະມະຕະນິບພານ ໄດ້ແກ່ ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ທຳເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກຳໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ນີ້ເປັນບົດສະງົບ ເປັນບົດປະນີດ

ອີກໄນໜຶ່ງ ໂດຍຄວາມໝາຍຕ່າງກັນ ທຳເຫຼົ່າໃດ ເປັນໄປເພື່ອບັນລຸຄວາມສະງົບ ຖືກຕ້ອງຄວາມສະງົບ ເຮັດໃຫ້ແຈ້ງຄວາມສະງົບ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ທຳເຫຼົ່ານີ້ ຕັດຮຽກວ່າ ສັນຕິບົດ (ທາງສະງົບ) ຕານະບົດ (ທາງປົກປ້ອງ) ເລນະບົດ (ທາງຫຼົບຫຼີກ) ສະຣະນະບົດ (ທາງເປັນທີ່ເພິ່ງ) ອະພະຍະບົດ (ທາງບໍ່ມີໄພ) ອັດຈຸຕະບົດ (ທາງທີ່ບໍ່ຈຸຕິ) ອະມະຕະບົດ(ທາງອະມະຕະທຳ) ນິບພານບົດ (ທາງນິບພານ)

ຄຳວ່າ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄື ຄົ້ນຫາ ເສາະຫາສີນຂັນໃຫຍ່ ຈຶ່ງຊື່ວ່າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄື ຄົ້ນຫາ ເສາະຫາ ສະມາທິຂັນໃຫຍ່ ຯລຯ ປັນຍາຂັນໃຫຍ່ ຯລຯ ວິມຸດຕິຂັນໃຫຍ່ ຯລຯ ວິມຸດຕິຍານະທັດສະນະຂັນໃຫຍ່ ຈຶ່ງຊື່ວ່າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄື ຄົ້ນຫາ ເສາະຫາເຄື່ອງທຳລາຍກອງຄວາມມືດໃຫຍ່ ເຄື່ອງທຳລາຍຄວາມວິປະລາສະໃຫຍ່ ເຄື່ອງຖອນລູກສອນຄືຕັນຫາໃຫຍ່ ເຄື່ອງປົດເປື້ອງໂຄງທິດຖິໃຫຍ່ ເຄື່ອງກຳຈັດທຸງຄືມານະໃຫຍ່ ເຄື່ອງເຂົ້າໄປສະງົບອະພິສັງຂານໃຫຍ່ ເຄື່ອງປິດກັ້ນໂອຄະໃຫຍ່ ເຄື່ອງວາງພາຣະໃຫຍ່ ເຄື່ອງຕັດສັງສາຣະວັດໃຫຍ່ ເຄື່ອງດັບຄວາມເດືອດຮ້ອນໃຫຍ່ ເຄື່ອງຣະງັບຄວາມຮ້ອນຮົນໃຫຍ່ ເຄື່ອງຍົກທຸງຄືທຳໃຫຍ່ ຈຶ່ງຊື່ວ່າ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄື ຄົ້ນຫາ ເສາະຫາສະຕິປັດຖານໃຫຍ່ ສຳມັບປະທານໃຫຍ່ ອິດທິບາດໃຫຍ່ ອິນຊີໃຫຍ່ ພະລະໃຫຍ່ ໂພດຊົງໃຫຍ່ ອະຣິຍະມັກມີອົງ ໘ ໃຫຍ່ ປະຣະມັດຖະອະມະຕະນິບພານໃຫຍ່ ຈຶ່ງຊື່ວ່າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ທີ່ເຫຼົ່າສັດມະເຫສັກສະແຫວງຫາ ຄື ຄົ້ນຫາ ເສາະຫາວ່າ ພຣະພຸດທະເຈົ້າປະທັບຢູ່ບ່ອນໃດ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃສ ພຣະຜູ້ຊົງ

ເປັນເທບຍິ່ງກວ່າເທບປະທັບຢູ່ບ່ອນໃດ ພຣະຜູ້ຊົງອົງອາດກວ່ານໍຣະຊົນປະທັບຢູ່ບ່ອນໃດ ຈຶ່ງຊື່ວ່າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ລວມຄວາມວ່າ ຜູ້ມີວິເວກ ມີສັນຕິບົດ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ຄຳວ່າ ພິກຂຸເຫັນແນວໃດ ฯລฯ ດັບໄປ ອະທິບາຍວ່າ ພິກຂຸເຫັນ ຄື ແນມເຫັນ ທຽບຄຽງພິຈາລະນາ ເຮັດໃຫ້ກະຈ່າງແຈ້ງ ເຮັດໃຫ້ແຈ່ມແຈ້ງແນວໃດ ຈຶ່ງເຮັດໃຫ້ຣາຄະຂອງຕົນດັບໄປ ເຮັດໃຫ້ໂທສະຂອງຕົນດັບໄປ ເຮັດໃຫ້ໂມຫະຂອງຕົນດັບໄປ ເຮັດໃຫ້ໂກທະ ฯລฯ ອຸປະນາຫະ ฯລฯ ມັກຂະ ฯລฯ ປະລາສະ ฯລฯອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖໍາພະ ฯລฯ ສາຣໍາພະ ฯລฯ ມານະ ฯລฯ ອະຕິມານະ ฯລฯມະທະ ฯລฯ ປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯຄວາມຮ້ອນຮົນທຸກສະຖານ ฯລฯ ຄວາມເດືອດຮ້ອນທຸກປະການ ฯລฯ ອະກຸສະລາພິສັງຂານທຸກປະເພດດັບໄປ ຄື ເຮັດໃຫ້ສະງົບ ໃຫ້ເຂົ້າໄປສະງົບ ໃຫ້ສະງົບເຢັນຣະງັບສາໄດ້

ຄໍາວ່າ ພິກຂຸ ໄດ້ແກ່ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ພິກຂຸຜູ້ເປັນພຣະເສຂະ ລວມຄວາມວ່າ ພິກຂຸເຫັນແນວໃດ ฯລฯ ດັບໄປ

ຄໍາວ່າ ຈຶ່ງບໍ່ຖືໝັ້ນອັນໃດ ໆ ໃນໂລກ ໄດ້ແກ່ ບໍ່ຖືໝັ້ນ ຄື ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນດ້ວຍອຸປາທານ ໔

ຄໍາວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ

ຄໍາວ່າ ອັນໃດ ໆ ໄດ້ແກ່ ອັນໃດ ໆ ທີ່ເປັນຮູບ ເວທະນາ ສັນຍາ ສັງຂານ ວິນຍານ ລວມ ຄວາມວ່າ ຈຶ່ງບໍ່ຖືໝັ້ນອັນໃດ ໆ ໃນໂລກ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ຂ້າພຣະອົງຂໍທູນຖາມພຣະອົງ
ຜູ້ຊົງເປັນເຜົ່າພັນພຣະອາທິດ ຜູ້ມີວິເວກ ມີສັນຕິບົດ
ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ວ່າ ພິກຂຸເຫັນແນວໃດ
ຈຶ່ງບໍ່ຖືໝັ້ນອັນໃດ ໆ ໃນໂລກ ດັບໄປ

[໑໕໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບ ດັ່ງນີ້)

ພິກຂຸເພິ່ງກຳຈັດບາບທຳທັງປວງ ທີ່ເປັນຮາກເຫງົ້າ
ຂອງສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ແລະອັດສະມິມານະດ້ວຍປັນຕາ
ຕັນຫາແນວໃດແນວໜຶ່ງທີ່ເກີດໃນພາຍໃນ
ພິກຂຸມີສະຕິທຸກເມື່ອ ເພິ່ງສຶກສາເພື່ອກຳຈັດຕັນຫາເຫຼົ່ານັ້ນ

# ວ່າດ້ວຍທຳເປັນເຄື່ອງເນີ່ນຊ້າ

ຄຳວ່າ ພິກຂຸເພິ່ງກຳຈັດບາບທຳທັງປວງ ທີ່ເປັນຮາກເຫງົ້າຂອງສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ແລະອັດສະມິມານະດ້ວຍມັນຕາ ອະທິບາຍວ່າ ທຳເປັນເຄື່ອງເນີ່ນຊ້ານັ້ນ ຊື່ວ່າສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ຄື ສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ຄື ຕັນຫາ ສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ຄື ທິດຖິ

ຮາກເຫງົ້າແຫ່ງທຳເປັນເຄື່ອງເນີ່ນຊ້າ ຄື ຕັນຫາ ຄື ອັນໃດ?

ຄື ອະວິດຊາ (ຄວາມບໍ່ຮູ້) ອະໂຍນິໂສມະນະສິການ (ຄວາມບໍ່ເຮັດໄວ້ໃນໃຈໂດຍແຍບຄາຍ) ອັດສະມິມານະ (ຄວາມຖືຕົວ) ອະຫິຣິກະ (ຄວາມບໍ່ລະອາຍ) ອະໂນດຕັບປະ(ຄວາມບໍ່ເກງກົວ) ອຸດທັດຈະ (ຄວາມຟຸ້ງຊ່ານ) ນີ້ຊື່ວ່າຮາກເຫງົ້າແຫ່ງທຳເປັນເຄື່ອງເນີ່ນຊ້າ ຄື ຕັນຫາ

ຮາກເຫງົ້າແຫ່ງທຳເປັນເຄື່ອງເນີ່ນຊ້າ ຄື ທິດຖິ ຄື ອັນໃດ?

ຄື ອະວິດຊາ ອະໂຍນິໂສມະນະສິການ ອັດສະມິມານະ ອະຫິຣິກະ ອະໂນດຕັບປະ ອຸດທັດຈະນີ້ຊື່ວ່າ ຮາກເຫງົ້າແຫ່ງທຳເປັນເຄື່ອງເນີ່ນຊ້າຄືທິດຖິ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ

ອີກໄນໜຶ່ງ ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍຣາຄະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂທສະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂມຫະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍມານະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍທິດຖິໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍສົງຄາມໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍກິເລດໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງຈຳແນກ ແຍກແຍະ ແຈກແຈງທຳຣັດຕະນະ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງເຮັດທີ່ສຸດແຫ່ງພົບໄດ້

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມພຣະວໍຣະກາຍແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມສິນ ອົບຮົມຈິດ ອົບຮົມປັນຍາແລ້ວ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ສອຍເສນາສະນະ ທີ່ເປັນປ່າເລົ່າແລະປ່າທຶບອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນຄວນເປັນບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມີສ່ວນແຫ່ງຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງອັດຖະຣິດ ທຳມະຣິດ ວິມຸດຕິຣິດອະທິສີນ ອະທິຈິດ ອະທິປັນຍາ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຊານ ໔ ອັບປະມັນຍາ ໔ ອະຣູບສະມາບັດ ໔ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງວິໂມກ ๘ ອະພິພາຍະຕະນະ ๘ ອະນຸປຸບພະວິຫາຣະສະມາບັດ ๙ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສັນຍາພາວະນາ ໑໐ ກະສິນສະມາບັດ ໑໐ ອານາປານະສະຕິສະມາທິ ອະສຸພະສະມາບັດ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ๗ ອະຣິຍະມັກມີອົງ ๘ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຕະຖາຄົດພະລະຍານ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ ພະນາມວ່າພຣະຜູ້ມີພຣະພາກເຈົ້ານີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດແລະອຳມາດຕັ້ງ ບໍ່ແມ່ນພຣະຍາດແລະຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້ານີ້ ເປັນວິໂມກຂັນຕິກະນາມ ເປັນສັດສິກາບັນຍັດຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ພ້ອມກັບການບັນລຸພຣະສັບພັນຍຸຕະຍານ ທີ່ເຫງົ້າຕົ້ນໂພລວມຄວາມວ່າ ພິກຂຸເພິ່ງກຳຈັດບາບທຳທັງປວງ ທີ່ເປັນຮາກເຫງົ້າຂອງສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ

ຄຳວ່າ ເພິ່ງກຳຈັດບາບທຳທັງປວງ ໆລໆ ອັດສະມີມານະດ້ວຍມັນຕາ ອະທິບາຍວ່າ ປັນຍາຕັດຮຽກວ່າ ມັນຕາ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ໆລໆ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ

ຄຳວ່າ ອັດສະມີມານະ ໄດ້ແກ່ ມານະວ່າ “ມີເຮົາ” ສັນທະວ່າ “ມີເຮົາ” ອະນຸໄສວ່າ “ມີເຮົາ” ໃນຮູບ ເວທະນາ ສັນຍາ ສັງຂານ ວິນຍານ

ຄຳວ່າ ພິກຂຸເພິ່ງກຳຈັດບາບທຳທັງປວງ ທີ່ເປັນຮາກເຫງົ້າຂອງສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ແລະອັດສະມີມານະດ້ວຍມັນຕາ ອະທິບາຍວ່າ ພິກຂຸເພິ່ງກຳຈັດ ຄື ເຂົ້າໄປກຳຈັດ ໃຫ້ດັບ ໃຫ້ເຂົ້າໄປສະງົບ ໃຫ້ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບບາບທຳທັງປວງ ທີ່ເປັນຮາກເຫງົ້າຂອງສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ແລະອັດສະມີມານະ ດ້ວຍມັນຕາ ລວມຄວາມວ່າ ພິກຂຸເພິ່ງກຳຈັດບາບທຳທັງປວງ ທີ່ເປັນຮາກເຫງົ້າຂອງສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າ ແລະອັດສະມີມານະດ້ວຍມັນຕາ

ຄຳວ່າ ແນວໃດແນວໜຶ່ງ ໃນຄຳວ່າ ຕັນຫາແນວໃດແນວໜຶ່ງ ທີ່ເກີດໃນພາຍໃນ ໄດ້ແກ່ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ແນວໃດແນວໜຶ່ງ ນີ້ເປັນຄຳກ່າວລວມໄວ້ທັງໝົດ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ຯລຯ ທຳມະຕັນຫາ

ຄຳວ່າ ທີ່ເກີດໃນພາຍໃນ ໄດ້ແກ່ ຕັນຫາທີ່ເກີດໃນພາຍໃນ ຈຶ່ງຊື່ວ່າທີ່ເກີດໃນພາຍໃນ

ອີກໄນໜຶ່ງ ຈິດ ຕັດຮຽກວ່າ ທີ່ເກີດໃນພາຍໃນ ຄື ຈິດ ມະໂນ ມານັດ ຫົວໃຈປັນຖະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດທີ່ເກີດຈາກຜັດສະ ເປັນຕົ້ນນັ້ນ ຕັນຫານັ້ນໄປພ້ອມກັນ ຄື ເກີດຮ່ວມກັນ ປະປົນກັນ ກ່ຽວເນື່ອງກັນເກີດພ້ອມກັນ ດັບພ້ອມກັນ ມີວັດຖຸຢ່າງດຽວກັນ ມີອາລົມຢ່າງດຽວກັນກັບຈິດ ຈຶ່ງຊື່ວ່າທີ່ເກີດໃນພາຍໃນ ລວມຄວາມວ່າ ຕັນຫາແນວໃດແນວໜຶ່ງ ທີ່ເກີດໃນພາຍໃນ

## ວ່າດ້ວຍຜູ້ມີສະຕິດ້ວຍເຫດ ໔

ຄຳວ່າ ທຸກເມື່ອ ໃນຄຳວ່າ ພິກຂຸມີສະຕິທຸກເມື່ອ ເພິ່ງສຶກສາເພື່ອກຳຈັດຕັນຫາເຫຼົ່ານັ້ນ ໄດ້ແກ່ ທຸກເມື່ອ ຄື ໃນການທັງປວງ ຕະຫຼອດການທັງປວງ ຕະຫຼອດການເປັນນິດ ຕະຫຼອດການຍັ່ງຍືນ ຕະຫຼອດການຕໍ່ເນື່ອງກັນ ຕະຫຼອດການສືບເນື່ອງກັນ ຕະຫຼອດການຕິດຕໍ່ກັນ ຕະຫຼອດການເປັນລຳດັບ ຕະຫຼອດການຕິດຕໍ່ກັນເໝືອນຣະລອກຄື້ນ ຕະຫຼອດການເປັນໄປຕໍ່ເນື່ອງບໍ່ຂາດສາຍ ຕະຫຼອດການສືບຕໍ່ກັນກະຊັ້ນຊິດ ຕະຫຼອດການກ່ອນພັດ ຫຼັງພັດ ຕະຫຼອດປະຖົມມະຍາມ ມັດຊິມະຍາມ ປັດສິມມະຍາມ ຕະຫຼອດຂ້າງແຮມ ຂ້າງຂຶ້ນ ຕະຫຼອດລະດູຝົນ ລະດູໜາວ ລະດູຮ້ອນຕະຫຼອດປະຖົມມະໄວ ມັດຊິມະໄວ ປັດສິມມະໄວ

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
໒. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
໓. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
໔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນເວັ້ນຈາກຄວາມເປັນຜູ້ບໍ່ມີສະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ເຮັດສິ່ງທັງຫຼາຍທີ່ຄວນເຮັດດ້ວຍສະຕິ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ກຳຈັດສິ່ງທັງຫຼາຍທີ່ເປັນຝ່າຍກົງກັນຂ້າມກັບສະຕິ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ບໍ່ຫຼົງລືມທຳທັງຫຼາຍທີ່ເປັນມູນເຫດແຫ່ງສະຕິ

ມີສະຕິດ້ວຍເຫດອີກ ๔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນເປັນຜູ້ພຽບພ້ອມດ້ວຍສະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ຊຳນານໃນສະຕິ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ຄ່ອງແຄ່ວໃນສະຕິ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ບໍ່ຫວນກັບຈາກສະຕິ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນມີຢູ່ຕາມປົກກະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ສະຫງົບ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ຣະງັບ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ປະກອບດ້ວຍທຳຂອງສັດຕະບຸຣຸດ

ມີສະຕິດ້ວຍເຫດອີກ ໑໐ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງພຸດທະຄຸນ
໒. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງທຳມະຄຸນ
໓. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງສັງຄະຄຸນ
໔. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງສີນທີ່ຕົນຮັກສາ
໕. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງທານທີ່ຕົນບໍລິຈາກແລ້ວ
໖. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງຄຸນນະທຳທີ່ເຮັດຄົນໃຫ້ເປັນເທວະດາ
໗. ຊື່ວ່າມີສະຕິ ຍ້ອນຕັ້ງສະຕິກຳນົດລົມກາຍໃຈເຂົ້າອອກ
໘. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງຄວາມຕາຍທີ່ຈະຕ້ອງມີເປັນທຳມະດາ
໙. ຊື່ວ່າມີສະຕິ ຍ້ອນຣະນຶກທົ່ວໄປໃນກາຍ (ໃຫ້ເຫັນວ່າບໍ່ງາມ)
໑໐. ຊື່ວ່າມີສະຕິ ຍ້ອນຣະນຶກເຖິງທຳທີ່ສະງົບຣະງັບ(ກິເລດແລະຄວາມທຸກ)ຄືນິບພານ

ສະຕິ ຄື ຄວາມຕາມຣະນຶກເຖິງ ຄວາມຣະນຶກໄດ້ສະເພາະໜ້າ ສະຕິ ຄື ຄວາມຣະນຶກໄດ້ຄວາມຈຳໄດ້ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ຄື ສະຕິນຊີ (ສະຕິທີ່ເປັນໃຫຍ່) ສະຕິພະລະ (ສະຕິທີ່ເປັນກຳລັງ) ສຳມາສະຕິ (ຣະລຶກຊອບ) ສະຕິສຳໂພດຊົງ (ສະຕິເປັນອົງແຫ່ງການຕັດສະຣູ້ທຳ) ເອກາຍະນະມັກ (ສະຕິທີ່ເປັນທາງເອກ) ນີ້ແລ ຕັດຮຽກວ່າສະຕິ ບຸກຄົນນັ້ນຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍສະຕິນີ້ ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ມີສະຕິ

ຄຳວ່າ ເພິ່ງສຶກສາ ອະທິບາຍວ່າ ສິກຂາ ໓ ຄື

໑. ອະທິສີລະສິກຂາ

໔. ອະທິຈິດຕະສິກຂາ

໓. ອະທິປັນຍາສິກຂາ

ອະທິສີລະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ສົມບູນດ້ວຍອາຈາຣະແລະໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍຢູ່ ຄື ສີນຂັນນ້ອຍ ສີນຂັນໃຫຍ່ ສີນເປັນທີ່ເພິ່ງ ເປັນເບື້ອງຕົ້ນ ເປັນຄວາມປະພຶດ ເປັນຄວາມສັງລວມ ເປັນຄວາມຣະວັງ ເປັນຫົວໜ້າ ເປັນປະທານເພື່ອຄວາມເຖິງພ້ອມແຫ່ງທຳທີ່ເປັນກຸສົນ ນີ້ຊື່ວ່າອະທິສີລະສິກຂາ

ອະທິຈິດຕະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກການ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກ ອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານ ສະງົບຣະງັບໄປແລ້ວບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານມີແຕ່ປີຕິ ແລະສຸກທີ່ເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ແລ້ວ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຊື່ວ່າອະທິຈິດຕະສິກຂາ

ອະທິປັນຍາສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາອັນປະເສີດຢັ່ງເຖິງຄວາມເກີດແລະຄວາມດັບ ເພີກຖອນກິເລດ ໃຫ້ບັນລຸເຖິງຄວາມສິ້ນທຸກໂດຍຊອບ

ທ່ານຮູ້ຕາມຄວາມເປັນຈິງວ່າ "ນີ້ທຸກ"
ທ່ານຮູ້ຕາມຄວາມເປັນຈິງວ່າ "ນີ້ທຸກຂະສະມຸໄທ"
ທ່ານຮູ້ຕາມຄວາມເປັນຈິງວ່າ "ນີ້ທຸກຂະນິໂຣທະ"
ທ່ານຮູ້ຕາມຄວາມເປັນຈິງວ່າ "ນີ້ທຸກຂະນິໂຣທະຄາມີນີປະຕິປະທາ"
ທ່ານຮູ້ຕາມຄວາມເປັນຈິງວ່າ "ເຫຼົ່ານີ້ອາສະວະ"
ທ່ານຮູ້ຕາມຄວາມເປັນຈິງວ່າ "ນີ້ອາສະວະສະມຸໄທ"
ທ່ານຮູ້ຕາມຄວາມເປັນຈິງວ່າ "ນີ້ອາສະວະນິໂຣທະ "

ທ່ານຮູ້ຕາມຄວາມເປັນຈິງວ່າ "ນີ້ອາສະວະນິໂຣທະຄາມິນີປະຕິປະທາ"
ນີ້ຊື່ວ່າ ອະທິປັນຍາສິກຂາ

ຄຳວ່າ ພິກຂຸມີສະຕິທຸກເມື່ອ ເພິ່ງສຶກສາເພື່ອກຳຈັດຕັນຫາເຫຼົ່ານັ້ນ ອະທິບາຍວ່າພິກຂຸເພິ່ງສຶກສາທັງອະທິສີລະສິກຂາ ອະທິຈິດຕະສິກຂາ ອະທິປັນຍາສິກຂາ ຄື ສິກຂາ ໓ ເຫຼົ່ານີ້ ເມື່ອພິກຂຸນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຊື່ວ່າເພິ່ງສຶກສາ ເມື່ອເຫັນ ຊື່ວ່າເພິ່ງສຶກສາ ເມື່ອພິຈາລະນາ ຊື່ວ່າເພິ່ງສຶກສາ ເມື່ອອະທິຖານຈິດ ຊື່ວ່າເພິ່ງສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າເພິ່ງສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງສະຕິ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງໃຈໝັ້ນ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າເພິ່ງສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າເພິ່ງສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າເພິ່ງສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າເພິ່ງສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ກໍຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບສະມາທານປະພຶດ ເພື່ອກຳຈັດ ຄື ບັນເທົາ ລະ ສະງົບ ສະລັດຖິ້ມ ຣະງັບຕັນຫາເຫຼົ່ານັ້ນ ລວມຄວາມວ່າພິກຂຸມີສະຕິທຸກເມື່ອ ເພິ່ງສຶກສາເພື່ອກຳຈັດຕັນຫາເຫຼົ່ານັ້ນດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ພິກຂຸເພິ່ງກຳຈັດບາບທຳທັງປວງ ທີ່ເປັນຮາກເຫງົ້າ
ຂອງສ່ວນແຫ່ງທຳເປັນເຄື່ອງເນີ່ນຊ້າແລະອັດສະມິມານະດ້ວຍປັນຍາ
ຕັນຫາແນວໃດແນວໜຶ່ງທີ່ເກີດໃນພາຍໃນ
ພິກຂຸມີສະຕິທຸກເມື່ອ ເພິ່ງສຶກສາເພື່ອກຳຈັດຕັນຫາເຫຼົ່ານັ້ນ

[໑໕໘] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ພິກຂຸເພິ່ງຮູ້ຄຸນນະທຳແນວໃດແນວໜຶ່ງໃນພາຍໃນ
ຫຼືໃນພາຍນອກ ແຕ່ບໍ່ຄວນທຳຄວາມດື້ດ້ານຍ້ອນຄຸນນະທຳນັ້ນ
ຍ້ອນການທຳຄວາມດື້ດ້ານນັ້ນ
ຜູ້ສະງົບທັງຫຼາຍບໍ່ກ່າວວ່າ ເປັນຄວາມດັບກິເລດ

ຄຳວ່າ ພິກຂຸເພິ່ງຮູ້ຄຸນນະທຳແນວໃດແນວໜຶ່ງໃນພາຍໃນ ອະທິບາຍວ່າ ພິກຂຸເພິ່ງຮູ້ຄຸນນະທຳຂອງຕົນແນວໃດແນວໜຶ່ງ ຄື ຄຸນນະທຳຝ່າຍກຸສົນ ຫຼື ຄຸນນະທຳຝ່າຍອັບພະຍາກະຕະ

ຄຸນນະທຳຂອງຕົນ ເປັນແນວໃດ?

ຄື ພິກຂຸເປັນຜູ້ມີຄວາມເຫັນວ່າ ເຮົາເປັນຜູ້ອອກບວດຈາກຕະກູນສູງ ອອກບວດຈາກຕະກູນໃຫຍ່ ອອກບວດຈາກຕະກູນມີໂພຄະຊັບຫຼາຍ ຫຼື ອອກບວດຈາກຕະກູນມີໂພຄະຊັບຍິ່ງໃຫຍ່ ເປັນຜູ້ມີຊື່ສຽງຜາກົດ ມີຍົດກວ່າຄະລືຫັດ ແລະບັນພະຊິດ ເປັນຜູ້ມີປົກກະຕິໄດ້ ຈີວອນ

ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ເປັນຜູ້ຊົງຈຳພຣະສູດ ເປັນຜູ້ຊົງຈຳພຣະວິໄນ ເປັນພຣະທຳມະກະຖຶກ ເປັນຜູ້ຢູ່ປ່າເປັນຂໍ້ວັດ ເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດ ເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນ ຂໍ້ວັດ ເປັນຜູ້ງົດສັນອາຫານຄາບຫຼັງເປັນຂໍ້ວັດ ເປັນຜູ້ຖືການນັ່ງເປັນຂໍ້ວັດ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດ ເປັນຜູ້ໄດ້ປະຖົມຊານ ໄດ້ທຸຕິຍະຊານໄດ້ຕະຕິຍະຊານ ໄດ້ຈະຕຸດຖະຊານ ໄດ້ອາກາສານັນຈາຍະຕະນະສະມາບັດ ຯລຯ ໄດ້ວິນຍານັນຈາຍະຕະນະສະມາບັດ ຯລຯ ໄດ້ອາກິນຈັນຍາຍະຕະນະສະມາບັດ ຯລຯ ຫຼື ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ເຫຼົ່ານີ້ ຕັດຮຽກວ່າ ຄຸນນະທຳຂອງຕົນ ພິກຂຸເພິ່ງຮູ້ ຄື ຮູ້ທົ່ວ ຮູ້ແຈ່ມແຈ້ງຮູ້ສະເພາະແທງຕະຫຼອດຄຸນນະທຳຂອງຕົນແນວໃດແນວໜຶ່ງ ລວມຄວາມວ່າ ພິກຂຸເພິ່ງຮູ້ຄຸນນະທຳແນວໃດແນວໜຶ່ງໃນພາຍໃນ

ຄຳວ່າ ຫຼືໃນພາຍນອກ ອະທິບາຍວ່າ ຄຸນນະທຳເຫຼົ່ານັ້ນ ເປັນຂອງອຸປັດຊາ ຫຼືອາຈານ ລວມຄວາມວ່າ ໃນພາຍໃນ ຫຼື ໃນພາຍນອກ

ຄຳວ່າ ແຕ່ບໍ່ຄວນທຳຄວາມດື້ດ້ານຍ້ອນຄຸນນະທຳນັ້ນ ອະທິບາຍວ່າ ພິກຂຸບໍ່ຄວນເຮັດຄວາມດື້ດ້ານ ຄື ບໍ່ເພິ່ງເຮັດຄວາມດື້ດຶງ ບໍ່ເພິ່ງເຮັດຄວາມຖືຕົວ ບໍ່ເພິ່ງເຮັດຄວາມຈອງຫອງ ບໍ່ເພິ່ງເຮັດຄວາມຈອງຫອງ ຍ້ອນຄຸນນະທຳຂອງຕົນ ຫຼື ຄຸນນະທຳຂອງຜູ້ອື່ນ ໄດ້ແກ່ ບໍ່ເພິ່ງໃຫ້ມານະເກີດ ຍ້ອນຄຸນນະທຳນັ້ນ ບໍ່ເພິ່ງເປັນຄົນກະດ້າງ ຈອງຫອງ ຫົວສູງ ຍ້ອນຄຸນນະທຳນັ້ນ ລວມຄວາມວ່າ ແຕ່ບໍ່ຄວນເຮັດຄວາມດື້ດ້ານຍ້ອນຄຸນນະທຳນັ້ນ

ຄຳວ່າ ຍ້ອນການເຮັດຄວາມດື້ດ້ານນັ້ນ ຜູ້ສະງົບທັງຫຼາຍບໍ່ກ່າວວ່າ ເປັນຄວາມດັບ ກິເລດ ອະທິບາຍວ່າ ການເຮັດຄວາມດື້ດ້ານນັ້ນ ຜູ້ສະງົບທັງຫຼາຍ ຄື ຜູ້ສະງົບເຢັນ ສັດຕະບຸຣຸດພຣະພຸດທະເຈົ້າ ສາວົກຂອງພຣະພຸດທະເຈົ້າ ພຣະປັດເຈກພຸດທະເຈົ້າ ບໍ່ກ່າວ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ບັນຍັດ ບໍ່ກຳນົດ ບໍ່ເປີດເຜີຍ ບໍ່ຈຳແນກ ບໍ່ເຮັດໃຫ້ງ່າຍ ບໍ່ປະກາດວ່າເປັນຄວາມດັບກິເລດ ລວມຄວາມວ່າ ຍ້ອນການທຳຄວາມດື້ດ້ານນັ້ນ ຜູ້ສະງົບທັງຫຼາຍບໍ່ກ່າວວ່າເປັນຄວາມດັບກິເລດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸເພິ່ງຮູ້ຄຸນນະທຳແນວໃດແນວໜຶ່ງໃນພາຍໃນ
ຫຼືໃນພາຍນອກ ແຕ່ບໍ່ຄວນເຮັດຄວາມດື້ດ້ານຍ້ອນຄຸນນະທຳນັ້ນ
ຍ້ອນການທຳຄວາມດື້ດ້ານນັ້ນ
ຜູ້ສະງົບທັງຫຼາຍບໍ່ກ່າວວ່າ ເປັນຄວາມດັບກິເລດ

[๑๕๓] (พระผู้มีพระพาภเจ้าตัดว่า)

ພິກຂຸບໍ່ເພິ່ງສຳຄັນຕົນວ່າເຮົາເລີດກວ່າເຂົາ
ເຮົາດ້ອຍກວ່າເຂົາ ຫຼືວ່າເຮົາສະເໝີເຂົາຍ້ອນຄຸນນະທຳນັ້ນ
ເປັນຜູ້ພຽບພ້ອມດ້ວຍຄຸນນະທຳເປັນອະເນກແລ້ວ
ບໍ່ເພິ່ງກຳນົດຕົນ ດຳຣົງຢູ່

## ວ່າດ້ວຍມານະ

ຄຳວ່າ ພິກຂຸບໍ່ເພິ່ງສຳຄັນຕົນວ່າເຮົາເລີດກວ່າເຂົາ ຯລຯ ຍ້ອນຄຸນນະທຳນັ້ນ ອະທິບາຍວ່າ ພິກຂຸບໍ່ເພິ່ງໃຫ້ຄວາມດູໝິ່ນເກີດ ຍ້ອນຊາດ ໂຄດ ຄວາມເປັນບຸດຂອງຜູ້ມີຕະກູນຄວາມເປັນຜູ້ມີຮູບງາມ ຊັບ ການສຶກສາ ໜ້າທີ່ວຽກງານ ຫຼັກແຫ່ງສິລະປະວິທະຍາ ວິທະຍະຖານະຄວາມຄົງແກ່ຮຽນ ປະຕິພານ ຫຼື ສິ່ງອື່ນນອກຈາກທີ່ກ່າວແລ້ວວ່າ ເຮົາເລີດກວ່າເຂົາ ລວມຄວາມວ່າ ພິກຂຸບໍ່ເພິ່ງສຳຄັນຕົນວ່າເຮົາເລີດກວ່າເຂົາ ຯລຯ ຍ້ອນຄຸນນະທຳນັ້ນ

ຄຳວ່າ ເຮົາດ້ອຍກວ່າເຂົາ ຫຼື ວ່າເຮົາສະເໝີເຂົາ ອະທິບາຍວ່າ ພິກຂຸບໍ່ເພິ່ງໃຫ້ຄວາມຖືຕົວຕ່ຳເກີດຍ້ອນຊາດ ໂຄດ ຯລຯ ຫຼື ສິ່ງອື່ນນອກຈາກທີ່ກ່າວແລ້ວວ່າ “ເຮົາດ້ອຍກວ່າເຂົາ” ບໍ່ເພິ່ງໃຫ້ຄວາມຖືຕົວເກີດຍ້ອນຊາດ ໂຄດ ຄວາມເປັນບຸດຂອງຜູ້ມີຕະກູນ ຄວາມເປັນຜູ້ມີຮູບງາມ ຊັບ ການສຶກສາ ໜ້າທີ່ວຽກງານ ຫຼັກແຫ່ງສິລະປະວິທະຍາ ວິທະຍະຖານະ ຄວາມຄົງແກ່ຮຽນ ປະຕິພານ ຫຼື ສິ່ງອື່ນນອກຈາກທີ່ກ່າວແລ້ວວ່າ “ເຮົາສະເໝີເຂົາ” ລວມຄວາມວ່າ ເຮົາດ້ອຍກວ່າເຂົາ ຫຼື ວ່າເຮົາສະເໝີເຂົາ

ຄຳວ່າ ເປັນຜູ້ພຽບພ້ອມດ້ວຍຄຸນນະທຳເປັນອະເນກແລ້ວ ອະທິບາຍວ່າ ເປັນຜູ້ພຽບພ້ອມ ຄື ຫ້ອມລ້ອມ ພຽບພ້ອມ ປະກອບພ້ອມແລ້ວດ້ວຍອາການຫຼາຍຢ່າງລວມຄວາມວ່າ ເປັນຜູ້ພຽບພ້ອມດ້ວຍຄຸນນະທຳເປັນອະເນກແລ້ວ

ຄຳວ່າ ບໍ່ເພິ່ງກຳນົດຕົນ ດຳຣົງຢູ່ ອະທິບາຍວ່າ ອັດຕາ ຕັດຮຽກວ່າ ຕົນ ບໍ່ເພິ່ງກຳນົດ ຄື ກຳນົດວິເສດ ເຖິງຄວາມກຳນົດຕົນ ດຳຣົງຢູ່ ລວມຄວາມວ່າ ກໍບໍ່ເພິ່ງກຳນົດຕົນ ດຳຣົງຢູ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງສຳຄັນຕົນວ່າເຮົາເລີດກວ່າເຂົາ
ເຮົາດ້ອຍກວ່າເຂົາ ຫຼື ວ່າເຮົາສະເໝີເຂົາຍ້ອນຄຸນນະທຳນັ້ນ
ເປັນຜູ້ພຽບພ້ອມດ້ວຍຄຸນນະທຳເປັນອະເນກແລ້ວ
ບໍ່ເພິ່ງກຳນົດຕົນ ດຳຣົງຢູ່

[໑໕໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸເພິ່ງສະງົບກິເລດພາຍໃນນັ້ນເອງ
ບໍ່ເພິ່ງສະແຫວງຫາຄວາມສະງົບໂດຍທາງອື່ນ
ເມື່ອພິກຂຸສະງົບກິເລດພາຍໃນໄດ້ແລ້ວ
ຄວາມເຫັນວ່າມີຕົນ ຫຼື ຄວາມເຫັນວ່າບໍ່ມີຕົນ ກໍບໍ່ມີແຕ່ບ່ອນໃດ ໆ

ຄຳວ່າ ເພິ່ງສະງົບກິເລດພາຍໃນນັ້ນເອງ ອະທິບາຍວ່າ ພິກຂຸເພິ່ງສະງົບຣາຄະ ເພິ່ງສະງົບໂທສະ ເພິ່ງສະງົບໂມຫະພາຍໃນ ฯລฯ ເພິ່ງສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ຣະງັບໂກທະ ฯລฯ ອຸປະນາຫະ ฯລฯມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖໍາພະ ฯລฯ ສາຣໍາພະ ฯລฯມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯ ຄວາມຮ້ອນຮົນທຸກສະຖານ ฯລฯ ຄວາມເດືອນຮ້ອນທຸກປະການ ฯລฯອະກຸສະລາພິສັງຂານທຸກປະເພດພາຍໃນ ລວມຄວາມວ່າ ເພິ່ງສະງົບກິເລດພາຍໃນນັ້ນເອງ

ຄຳວ່າ ພິກຂຸ ฯລฯ ບໍ່ເພິ່ງສະແຫວງຫາຄວາມສະງົບໂດຍທາງອື່ນ ອະທິບາຍວ່າ ບໍ່ເພິ່ງສະແຫວງຫາ ຄື ບໍ່ເພິ່ງຄົ້ນຫາ ບໍ່ເພິ່ງເສາະຫາຄວາມສະງົບ ຄື ຄວາມເຂົ້າໄປສະງົບ ຄວາມສະງົບເຢັນ ຄວາມດັບ ຄວາມຣະງັບໄປໂດຍທາງອື່ນ ຄື ໂດຍມັກທີ່ບໍ່ມົດຈົດ ປະຕິປະທາທີ່ຜິດ ຫົນທາງທີ່ບໍ່ແມ່ນທາງອອກຈາກທຸກ ນອກຈາກສະຕິປັດຖານ ສໍາມັບປະທານ ອິດທິບາດອິນຊີ ພະລະ ໂພດຊົງ ອະຣິຍະມັກມີອົງ ໘ ລວມຄວາມວ່າ ພິກຂຸ ฯລฯບໍ່ເພິ່ງສະແຫວງຫາຄວາມສະງົບໂດຍທາງອື່ນ

ຄຳວ່າ ເມື່ອພິກຂຸສະງົບກິເລດພາຍໃນໄດ້ແລ້ວ ອະທິບາຍວ່າ ເມື່ອພິກຂຸສະງົບຣາຄະ ສະງົບໂທສະ ສະງົບໂມຫະພາຍໃນ ฯລฯ ເມື່ອພິກຂຸສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ຣະງັບອະກຸສະລາພິສັງຂານທຸກປະເພດພາຍໃນໄດ້ແລ້ວ ລວມຄວາມວ່າ ເມື່ອພິກຂຸສະງົບກິເລດພາຍໃນໄດ້ແລ້ວ

ຄຳວ່າ ບໍ່ມີ ໃນຄຳວ່າ ຄວາມເຫັນວ່າມີຕົນ ຫຼື ຄວາມເຫັນວ່າບໍ່ມີຕົນ ກໍບໍ່ມີແຕ່ບ່ອນໃດ ໆ ເປັນຄຳປະຕິເສດ

ຄຳວ່າ ຄວາມເຫັນວ່າມີຕົນ (ບໍ່ມີ) ໄດ້ແກ່ ຄວາມເຫັນວ່າທ່ຽງບໍ່ມີ
ຄຳວ່າ ຄວາມເຫັນວ່າບໍ່ມີຕົນ (ບໍ່ມີ) ໄດ້ແກ່ ຄວາມເຫັນວ່າຂາດສູນບໍ່ມີ
ຄຳວ່າ ຄວາມເຫັນວ່າມີຕົນ (ບໍ່ມີ) ໄດ້ແກ່ ສິ່ງທີ່ຖືບໍ່ມີ

ຄຳວ່າ ຄວາມເຫັນວ່າບໍ່ມີຕົນ (ບໍ່ມີ) ໄດ້ແກ່ ສິ່ງທີ່ຄວນປ່ອຍບໍ່ມີຜູ້ໃດ ບໍ່ມີສິ່ງທີ່ຖືໄວ້ ຜູ້ນັ້ນກໍບໍ່ມີສິ່ງທີ່ຄວນປ່ອຍ ຜູ້ໃດມີສິ່ງທີ່ຄວນປ່ອຍ ຜູ້ນັ້ນກໍມີສິ່ງທີ່ຖືໄວ້ ພຣະອະຣະຫັນກ້າວພົ້ນການຖື ແລະການປ່ອຍ ລ່ວງພົ້ນຄວາມຈະເລີນ ແລະຄວາມເສື່ອມໄດ້ແລ້ວ ພຣະອະຣະ ຫັນນັ້ນຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ຯລຯ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ຄວາມເຫັນວ່າມີຕົນ ຫຼື ຄວາມເຫັນວ່າບໍ່ມີຕົນ ກໍບໍ່ມີແຕ່ບ່ອນໃດ ໆ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸເພິ່ງສະງົບກິເລດພາຍໃນນັ້ນເອງ
ບໍ່ເພິ່ງສະແຫວງຫາຄວາມສະງົບໂດຍທາງອື່ນ
ເມື່ອພິກຂຸສະງົບກິເລດພາຍໃນໄດ້ແລ້ວ
ຄວາມເຫັນວ່າມີຕົນ ຫຼື ຄວາມເຫັນວ່າບໍ່ມີຕົນ ກໍບໍ່ມີແຕ່ບ່ອນໃດ ໆ

[໑໕໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄື້ນບໍ່ເກີດໃນສ່ວນກາງທະເລ ທະເລລຽບຢູ່ ສັນໃດ
ພິກຂຸເພິ່ງເປັນຜູ້ໝັ້ນຄົງ ບໍ່ຫວັ່ນໄຫວ ສັນນັ້ນ
ພິກຂຸບໍ່ເພິ່ງກໍ່ກິເລດເຄື່ອງຟູໃຈໃນບ່ອນໃດ ໆ

ຄຳວ່າ ຄື້ນບໍ່ເກີດໃນສ່ວນກາງທະເລ ທະເລລຽບຢູ່ ສັນໃດ ອະທິບາຍວ່າ ໂດຍສ່ວນເລິກ ທະເລເລິກ ໘໔,໐໐໐ ໂຍດ ນ້ຳສ່ວນລຸ່ມ ໔໐,໐໐໐ ໂຍດ ຍ່ອມກະເພື່ອມດ້ວຍຝູງປາແລະເຕົ່າ ນ້ຳສ່ວນເທິງ ໔໐,໐໐໐ ໂຍດ ກໍກະເພື່ອມດ້ວຍລົມ ນ້ຳສ່ວນກາງ ໔໐,໐໐໐ ໂຍດ ບໍ່ກະເພື່ອມ ບໍ່ສັ່ນສະເທືອນ ບໍ່ເຄື່ອນໄຫວ ບໍ່ຫວັ່ນໄຫວ ບໍ່ສັ່ນໄຫວ ບໍ່ປັ່ນປ່ວນເລີຍ ຄື ເປັນທະເລບໍ່ຫວັ່ນໄຫວ ບໍ່ຟົ້ງ ບໍ່ເຄື່ອນໄຫວ ບໍ່ກະເພື່ອມ ບໍ່ໝຸນວົນ ສະງົບ ຄື້ນບໍ່ເກີດກາງທະເລນັ້ນ ທະເລກໍລຽບຢູ່ ລວມຄວາມວ່າ ຄື້ນບໍ່ເກີດໃນສ່ວນກາງທະເລ ທະເລລຽບຢູ່ ສັນໃດ ແນວນີ້ແດ່

ອີກໄນໜຶ່ງ ທະເລສີທັນດອນຢູ່ລະຫວ່າງພູເຂົາ ໗ ລູກ ນ້ຳໃນທະເລສີທັນດອນນັ້ນ ບໍ່ກະເພື່ອມ ບໍ່ສັ່ນສະເທືອນ ບໍ່ເຄື່ອນໄຫວ ບໍ່ຫວັ່ນໄຫວ ບໍ່ສັ່ນໄຫວ ບໍ່ປັ່ນປ່ວນເລີຍ ຄືເປັນ ທະເລ ບໍ່ຫວັ່ນໄຫວ ບໍ່ຟົ້ງ ບໍ່ເຄື່ອນໄຫວ ບໍ່ກະເພື່ອມ ບໍ່ໝຸນວົນ ສະງົບຄື້ນບໍ່ເກີດໃນທະເລ ສີທັນດອນນັ້ນທະເລກໍລຽບຢູ່ ລວມຄວາມວ່າ ຄື້ນບໍ່ເກີດໃນສ່ວນກາງທະເລ ທະເລລຽບຢູ່ ສັນໃດ ແນວນີ້ແດ່

ຄຳວ່າ ສັນນັ້ນ ໃນຄຳວ່າ ພິກຂຸເພິ່ງເປັນຜູ້ໝັ້ນຄົງ ບໍ່ຫວັ່ນໄຫວ ສັນນັ້ນ ເປັນຄຳອຸປະໄມເຮັດອຸປະມາໃຫ້ສົມບູນ

ຄຳວ່າ ເພິ່ງເປັນຜູ້ໝັ້ນຄົງ ອະທິບາຍວ່າ ພິກຂຸນັ້ນບໍ່ຫວັ່ນໄຫວ ຄື ບໍ່ສະເທືອນ ບໍ່ເຄື່ອນໄຫວ ບໍ່ສະທ້ານ ບໍ່ສັ່ນສະທ້ານ ບໍ່ສະທົກສະທ້ານ ຍ້ອນໄດ້ລາບ ຍ້ອນເສື່ອມລາບແດ່ ຍ້ອນໄດ້

ຍົດ ຍ້ອນເສື່ອມຍົດແດ່ ຍ້ອນສັນເສີນ ຍ້ອນນິນທາແດ່ ຍ້ອນສຸກຍ້ອນທຸກແດ່ ລວມຄວາມວ່າ ເພິ່ງເປັນຜູ້ໝັ້ນຄົງ ໆລໆ ສັນນັ້ນ

ຄຳວ່າ ບໍ່ຫວັ່ນໄຫວ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຫວັ່ນໄຫວ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ໆລໆ ອະພິດຊາ ອະກຸສົນມູນ ຄື ໂລພະ ຕັນຫາທີ່ຕັດຮຽກວ່າ ຄວາມຫວັ່ນໄຫວນີ້ ພິກຂຸໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວຖອນໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ພິກຂຸນັ້ນ ຕັດຮຽກວ່າ ຜູ້ບໍ່ມີຕັນຫາເປັນເຫດຫວັ່ນໄຫວຍ້ອນເປັນຜູ້ລະຄວາມຫວັ່ນໄຫວໄດ້ແລ້ວ ຈຶ່ງຊື່ວ່າບໍ່ຫວັ່ນໄຫວ ພິກຂຸນັ້ນຍ່ອມບໍ່ຫວັ່ນໄຫວ ຄື ບໍ່ສະເທືອນ ບໍ່ເຄື່ອນໄຫວ ບໍ່ສະທ້ານ ບໍ່ສັ່ນສະທ້ານ ບໍ່ສະທົກສະທ້ານ

ຍ້ອນໄດ້ລາບ ຍ້ອນເສື່ອມລາບແດ່ ຍ້ອນໄດ້ຍົດ ຍ້ອນເສື່ອມຍົດແດ່ ຍ້ອນສັນເສີນຍ້ອນນິນທາແດ່ ຍ້ອນສຸກ ຍ້ອນທຸກແດ່ ລວມຄວາມວ່າ ພິກຂຸເພິ່ງເປັນຜູ້ໝັ້ນຄົງ ບໍ່ຫວັ່ນໄຫວສັນນັ້ນ

## ວ່າດ້ວຍກິເລດເຄື່ອງຟູໃຈ ໗ ຢ່າງ

ຄຳວ່າ ກິເລດເຄື່ອງຟູໃຈ ໃນຄຳວ່າ ພິກຂຸບໍ່ເພິ່ງກໍ່ກິເລດເຄື່ອງຟູໃຈ ໃນບ່ອນໃດ ໆ ໄດ້ແກ່ ກິເລດເຄື່ອງຟູໃຈ ໗ ຢ່າງ ຄື

໑. ກິເລດເຄື່ອງຟູໃຈຄື ຣາຄະ
໒. ກິເລດເຄື່ອງຟູໃຈຄື ໂທສະ
໓. ກິເລດເຄື່ອງຟູໃຈຄື ໂມຫະ
໔. ກິເລດເຄື່ອງຟູໃຈຄື ມານະ
໕. ກິເລດເຄື່ອງຟູໃຈຄື ທິດຖິ
໖. ກິເລດເຄື່ອງຟູໃຈຄື ກິເລດ
໗. ກິເລດເຄື່ອງຟູໃຈຄື ກຳ

ພິກຂຸບໍ່ເພິ່ງກໍ່ກິເລດເຄື່ອງຟູໃຈນັ້ນ ຄື ບໍ່ເພິ່ງໃຫ້ເກີດ ບໍ່ເພິ່ງໃຫ້ເກີດຂຶ້ນ ບໍ່ເພິ່ງໃຫ້ບັງເກີດ ບໍ່ເພິ່ງໃຫ້ບັງເກີດຂຶ້ນ

ຄຳວ່າ ໃນບ່ອນໃດ ໆ ໄດ້ແກ່ ໃນບ່ອນໃດ ຄື ບ່ອນໃດ ໆ ບ່ອນໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ ລວມຄວາມວ່າ ພິກຂຸບໍ່ເພິ່ງກໍ່ກິເລດເຄື່ອງຟູໃຈ ໃນບ່ອນໃດ ໆ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄື້ນບໍ່ເກີດໃນສ່ວນກາງທະເລ ທະເລງຽບຢູ່ ສັນໃດ
ພິກຂຸເພິ່ງເປັນຜູ້ໝັ້ນຄົງ ບໍ່ຫວັ່ນໄຫວ ສັນນັ້ນ
ພິກຂຸບໍ່ເພິ່ງກໍ່ກິເລດເຄື່ອງຟູໃຈໃນບ່ອນໃດ ໆ

[໑໕໗] (ພຣະພຸດທະເນຣະມິດທູນຖາມວ່າ)

ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸແຈ່ມແຈ້ງ
ໄດ້ຊົງສະແດງທຳທີ່ເປັນພະຍານ ອັນເປັນເຄື່ອງກຳຈັດອັນຕະລາຍ
ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຕັດບອກປະຕິປະທາ
ຄືປາຕິໂມກ ຫຼື ແມ່ນສະມາທິ

ຄຳວ່າ ໄດ້ຊົງສະແດງ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸແຈ່ມແຈ້ງໄດ້ຊົງສະແດງ ໄດ້ແກ່ ໄດ້ຊົງສະແດງ ຄື ໄດ້ຊົງຊີ້ແຈ່ງ ຕັດບອກ ສະແດງ ບັນຍັດກຳນົດ ເປີດເຜີຍຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ໄດ້ຊົງສະແດງ

## ວ່າດ້ວຍພຣະຈັກຂຸ ໕ ຊະນິດ

ຄຳວ່າ ຜູ້ມີພຣະຈັກຂຸແຈ່ມແຈ້ງ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸແຈ່ມແຈ້ງດ້ວຍພຣະຈັກຂຸ ໕ ຊະນິດ ຄື

໑. ມີພຣະຈັກຂຸແຈ່ມແຈ້ງດ້ວຍ ມັງສະຈັກຂຸແດ່
໒. ມີພຣະຈັກຂຸແຈ່ມແຈ້ງດ້ວຍ ທິບພະຈັກຂຸແດ່
໓. ມີພຣະຈັກຂຸແຈ່ມແຈ້ງດ້ວຍ ປັນຍາຈັກຂຸແດ່
໔. ມີພຣະຈັກຂຸແຈ່ມແຈ້ງດ້ວຍ ພຸດທະຈັກຂຸແດ່
໕. ມີພຣະຈັກຂຸແຈ່ມແຈ້ງດ້ວຍ ສະມັນຕະຈັກຂຸແດ່

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸແຈ່ມແຈ້ງດ້ວຍມັງສະຈັກຂຸ ເປັນແນວໃດ?

ຄື ໃນພຣະມັງສະຈັກຂຸຂອງພຣະຜູ້ມີພຣະພາກເຈົ້າ ມີສີຢູ່ ໕ ສີ ຄື (໑) ສີຂຽວ (໒) ສີເຫຼືອງ (໓) ສີແດງ (໔) ສີດຳ (໕) ສີຂາວ ໃນທີ່ທີ່ມີກັນພຣະເນດຂຶ້ນ ມີສີຂຽວ ຂຽວສະນິດ ໜ້າຊົມ ໜ້າເບິ່ງ ເໝືອນດອກຜັກຕົບ ຕໍ່ຈາກນັ້ນ ກໍເປັນສີເຫຼືອງ ເຫຼືອງສະນິດສີເໝືອນຄຳ ໜ້າຊົມໜ້າເບິ່ງ ເໝືອນດອກກັນນິກາ ເບົ້າພຣະເນດທັງສອງຂ້າງຂອງພຣະຜູ້ມີພຣະພາກເຈົ້າມີສີແດງແດງສະນິດ ໜ້າຊົມ ໜ້າເບິ່ງ ເໝືອນສີປີກແມງຄັບ ກາງດວງພຣະເນດມີສີດຳ ດຳເຂັ້ມ ບໍ່ເສົ້າໝອງ ສະນິດ ໜ້າຊົມ ໜ້າເບິ່ງ ເໝືອນສີສົ້ມມໍດຳ ຕໍ່ຈາກນັ້ນ ເປັນສີຂາວ ຂາວສະນິດ ເປ່ງປັ່ງຂາວນວນ ໜ້າຊົມ ໜ້າເບິ່ງ ເໝືອນສີດາວປະກາຍພຶກ ພຣະຜູ້ມີພຣະ ພາກເຈົ້າມີພຣະມັງສະຈັກຂຸນັ້ນຢູ່ໂດຍປົກກະຕິ ເນື່ອງໃນພຣະອັດຕະພາບ ເກີດດ້ວຍສຸດຈະຣິດ ກຳທີ່ຊົງສັ່ງສົມມາໃນພົບກ່ອນ ຊົງແນມເຫັນຕະຫຼອດ ໑ ໂຍດໂດຍຮອບ ທັງກາງເວັນແລະກາງຄືນ ແມ່ນໃນເວລາທີ່ມີຄວາມມືດປະກອບດ້ວຍອົງ ໔ ຄື (໑) ດວງອາທິດຕົກໄປແລ້ວ (໒) ເປັນວັນອຸໂປສົດຂ້າງແຮມ (໓) ປ່າໜາຮົກທຶບ (໔) ມີເມກກ້ອນໃຫຍ່ຟຸດຂຶ້ນມາ ໃນຄວາມມືດທີ່ປະກອບດ້ວຍອົງ ໔ ຢ່າງນີ້

ພຣະອົງກໍຊົງແນມເຫັນໄດ້ຕະຫຼອດ ໑ ໂຍດໂດຍຮອບບໍ່ມີຫຼຸບ ບານປະຕູ ກໍາແພງ ພູເຂົາ ກໍໄມ້ ຫຼື ເຄືອເຂົາມາປິດກັ້ນການເຫັນຮູບທັງຫຼາຍ ໄດ້ຫາກບຸກຄົນເອົາງາເມັດດຽວເຮັດເຄື່ອງໝາຍ ແລ້ວໃສ່ລົງໃນກວຽນບັນທຸກງາໄປ ພຣະຜູ້ມີພຣະພາກເຈົ້າກໍຊົງສາມາດຈັບເອົາເມັດງານັ້ນຂຶ້ນມາ ໄດ້ ພຣະມັງສະຈັກຂຸຕາມປົກກະຕິຂອງພຣະຜູ້ມີພຣະພາກເຈົ້າ ບໍລິສຸດແນວນີ້ ພຣະຜູ້ມີພຣະ ພາກເຈົ້າ ຊື່ວ່າ ມີພຣະຈັກຂຸແຈ່ມແຈ້ງດ້ວຍມັງສະຈັກຂຸເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸແຈ່ມແຈ້ງດ້ວຍທິບພະຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງເຫັນໝູ່ສັດ ເຊິ່ງກໍາລັງຈຸຕິ ກໍາລັງອຸບັດ ທຍາບ ປະນີດ ຜິວພັນດີ ຜິວພັນຊາມ ໄປດີ ຕົກຍາກ ດ້ວຍທິບພະຈັກຂຸອັນບໍລິສຸດລ່ວງຈັກຂຸມະນຸດຊົງຮູ້ໝູ່ສັດຜູ້ ເປັນໄປຕາມກໍາວ່າ “ເມື່ອສັດເຫຼົ່ານີ້ ປະກອບດ້ວຍກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດ ຈະຣິດ ຕິຕຽນພຣະອະຣິຍະ ເປັນມິດສາທິດຖິ ຢຶດຖືການທໍາດ້ວຍອໍານາດມິດສາທິດຖິ ຫຼັງຈາກ ຕາຍແລ້ວ ສັດເຫຼົ່ານັ້ນກໍເຂົ້າເຖິງອະບາຍ ທຸຄະຕິ ວິນິບາດ ນະຮົກ ແຕ່ເມື່ອສັດເຫຼົ່ານີ້ປະກອບ ກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ບໍ່ຕິຕຽນພຣະອະຣິຍະ ເປັນສໍາມາທິດຖິ ຢຶດຖື ການກະທໍາດ້ວຍອໍານາດສໍາມາທິດຖິ ຫຼັງຈາກຕາຍແລ້ວ ສັດເຫຼົ່ານັ້ນກໍເຂົ້າເຖິງສຸກຄະຕິ ໂລກ ສະຫວັນ” ພຣະຜູ້ມີພຣະພາກເຈົ້າຊົງເຫັນໝູ່ສັດ ເຊິ່ງກໍາລັງຈຸຕິ ກໍາລັງອຸບັດ ທຍາບ ປະນີດ ຜິວພັນດີ ຜິວພັນຊາມ ໄປດີ ຕົກຍາກ ດ້ວຍທິບພະຈັກຂຸ ອັນບໍລິສຸດລ່ວງຈັກຂຸມະນຸດ ຊົງຮູ້ໝູ່ ສັດຜູ້ເປັນໄປຕາມກໍາ ແລະພຣະຜູ້ມີພຣະພາກເຈົ້າເມື່ອຊົງປະສົງ ເພິ່ງຊົງເຫັນໄດ້ແມ່ນ ໑ ໂລກ ທາດ ໆລໆ ແມ່ນ ໒ ໂລກທາດ ໆລໆ ແມ່ນ ໓ ໂລກທາດ ໆລໆ ແມ່ນ ໔ ໂລກທາດ ໆລໆ ແມ່ນ ໕ ໂລກທາດ ໆລໆ ແມ່ນ ໑໐ ໂລກທາດ ໆລໆ ແມ່ນ ໒໐ ໂລກທາດ ໆລໆ ແມ່ນ ໓໐ ໂລກທາດ ໆລໆແມ່ນ ໔໐ ໂລກທາດ ໆລໆ ແມ່ນ ໕໐ ໂລກທາດ ໆລໆ ແມ່ນ ໑໐໐ ໂລກ ທາດ ໆລໆ ໂລກທາດຂະໜາດໜ້ອຍປະກອບດ້ວຍ ໑,໐໐໐ ຈັກກະວານ ໆລໆ ໂລກທາດຂະ ໜາດກາງປະກອບດ້ວຍ ໒,໐໐໐ ຈັກກະວານ ໆລໆ ໂລກທາດຂະໜາດໃຫຍ່ປະກອບດ້ວຍ ໓,໐ ໐໐ ຈັກກະວານ ໆລໆ ແມ່ນໂລກທາດທີ່ປະກອບດ້ວຍຫຼາຍພັນຈັກກະວານ ພຣະຜູ້ມີພຣະພາກ ເຈົ້າຊົງປະສົງພຽງໃດ ກໍເພິ່ງຊົງເຫັນໄດ້ພຽງນັ້ນ ທິບພະຈັກຂຸຂອງພຣະຜູ້ມີພຣະພາກເຈົ້າບໍລິສຸດ ແນວນີ້ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີພຣະຈັກຂຸແຈ່ມແຈ້ງດ້ວຍທິບພະຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸແຈ່ມແຈ້ງດ້ວຍປັນຍາຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະປັນຍາຫຼາຍ ມີພຣະປັນຍາກວ້າງຂວາງ ມີພຣະປັນຍາ ອາດຫານ ມີພຣະປັນຍາສັບໄວ ມີພຣະປັນຍາສຽບຄົມ ມີພຣະປັນຍາເພີກຖອນກິເລດໄດ້ ຊົງ ສະຫຼາດໃນປະເພດແຫ່ງປັນຍາ ມີພຣະຍານແຕກສານ ຊົງບັນລຸປະຕິສໍາພິທາ ຊົງບັນລຸເວສາຣັດ ຊະຍານ ໔ ເປັນຜູ້ຊົງທະສະພະລະຍານ ຊົງເປັນບຸຣຸດອົງອາດ ຊົງເປັນບຸຣຸດເໝືອນ ຣາດຊະສີ ຊົງ ເປັນບຸຣຸດເໝືອນນາກ ຊົງເປັນບຸຣຸດອາຊາໄນ ຊົງເປັນບຸຣຸດຜູ້ເອົາທຸຣະ ມີພຣະຍານຫາບ່ອນສຸດ

ບໍ່ໄດ້ ມີພຣະເດດຫາບ່ອນສຸດບໍ່ໄດ້ ມີພຣະຍົດຫາບ່ອນສຸດບໍ່ໄດ້ ຊົງມັ່ງຄັ່ງມີຊັບຫຼາຍ ຊົງມີປັນຍາເປັນຊັບ ຊົງເປັນຜູ້ນຳ ເປັນຜູ້ນຳໄປໂດຍວິເສດ ເປັນຜູ້ຕາມແນະນຳ ຊົງໃຫ້ຮູ້ຈັກປະໂຫຍດ ໃຫ້ພິນິດພິຈາລະນາ ຊົງເພ່ງປະໂຫຍດ ຊົງເຮັດໃຫ້ເຫຼື້ອມໃສໄດ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງເຮັດ ມັກ ທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊົງເຮັດ ມັກ ທີ່ຍັງບໍ່ເກີດພ້ອມໃຫ້ເກີດພ້ອມຕັດບອກມັກທີ່ຍັງບໍ່ໄດ້ຕັດບອກ ຊົງຮູ້ຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ແລະສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ດຳເນີນໄປຕາມມັກ ຢູ່ໃນບັດນີ້ ຈະພຽບພ້ອມດ້ວຍສີລາທິຄຸນໃນພາຍຫຼັງ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນມີພຣະຈັກຂຸ ມີພຣະທຳ ມີພຣະຍານ ເປັນເໝືອນພຣະພົມ ຕັດບອກ ນຳຄວາມໝາຍອອກມາ ປະທານອະມະຕະທຳ ເປັນພຣະທຳສາມີ ເປັນພຣະຕະຖາຄົດ ບໍ່ມີສິ່ງທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຍັງບໍ່ຊົງຮູ້ ບໍ່ຊົງເຫັນ ບໍ່ຊົງຮູ້ແຈ້ງ ບໍ່ຊົງເຮັດໃຫ້ແຈ້ງ ບໍ່ໄດ້ຊົງຖືກຕ້ອງດ້ວຍປັນຍາ ທຳທັງປວງລວມທັງອະດີດ ອະນາຄົດ ແລະປັດຈຸບັນ ຍ່ອມມາສ຺ູ່ຄອງສະເພາະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ໂດຍອາການທັງປວງ ທຳມະດາປະໂຫຍດທີ່ຄວນແນະນຳແນວໃດແນວໜຶ່ງ ເປັນທຳທີ່ຄວນຮູ້ມີຢູ່ ຄື ປະໂຫຍດຕົນປະໂຫຍດຜູ້ອື່ນ ຫຼື ປະໂຫຍດທັງສອງຝ່າຍປະໂຫຍດໃນພົບປັດຈຸບັນ ຫຼື ປະໂຫຍດໃນພົບໜ້າ ປະໂຫຍດຕື້ນ ຫຼື ປະໂຫຍດເລິກປະໂຫຍດລີ້ລັບ ຫຼື ປະໂຫຍດປິດບັງປະໂຫຍດທີ່ຄວນແນະນຳ ຫຼື ປະໂຫຍດທີ່ແນະນຳແລ້ວປະໂຫຍດທີ່ບໍ່ມີໂທດຫຼືປະໂຫຍດທີ່ບໍ່ມີກິເລດ ປະໂຫຍດທີ່ຜ່ອງແຜ້ວຫຼືປະໂຫຍດຢ່າງຍິ່ງປະໂຫຍດທັງໝົດນັ້ນ ຍ່ອມເປັນໄປພາຍໃນພຣະພຸດທະຍານ

ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ບໍ່ຕິດຂັດໃນອະດີດ ອະນາຄົດ ປັດຈຸບັນກາຍຍະກຳ ວະຈີກຳ ມະໂນກຳທຸກຢ່າງ ຍ່ອມເປັນໄປຕາມພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນບົດທຳທີ່ຄວນແນະນຳ ທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນ ຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນ ເໝືອນຊັ້ນແຫ່ງຜະອົບ ໔ ຊັ້ນທັບກັນສະນິດພໍດີ ຊັ້ນຜະອົບດ້ານລຸ່ມກໍບໍ່ເກີນດ້ານເທິງ ຊັ້ນຜະອົບດ້ານເທິງກໍບໍ່ເກີນດ້ານລຸ່ມ ຊັ້ນຜະອົບທັງ ໔ ຊັ້ນຍ່ອມວາງປະກົບກັນທີ່ສ່ວນສຸດໂດຍຮອບຂອງກັນແລະກັນໄດ້ ສັນໃດ ບົດທຳທີ່ຄວນແນະນຳ ແລະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ກໍຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນໄດ້ສັນນັ້ນຄືກັນ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີພຽງນັ້ນ ພຣະຍານມີຢູ່ພຽງໃດບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍ

ຍ່ອມມີພຣະຍານເປັນສ່ວນສຸດຮອບ  ພຣະຍານຍ່ອມບໍ່ເປັນໄປເກີນກວ່າບົດທຳທີ່ຄວນແນະນຳທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນ ຍ່ອມຕັ້ງຢູ່ໃນສ່ວນສຸດຮອບຂອງກັນ ແລະກັນພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ຍ່ອມເປັນໄປໃນທຳທັງປວງ

ທຳທັງປວງນັບເນື່ອງດ້ວຍຄວາມນຶກ ນັບເນື່ອງດ້ວຍຄວາມຫວັງ ນັບເນື່ອງດ້ວຍມະນະສິການ ນັບເນື່ອງດ້ວຍຈິດຕຸບບາດຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າຍ່ອມເປັນໄປໃນສັດທັງປວງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ອັດທະຍາໄສອະນຸໄສ ຈະຣິດ ອະທິມຸດຕິຂອງເຫຼົ່າສັດທຸກຈຳພວກ ຊົງຮູ້ຈັກເຫຼົ່າສັດຜູ້ມີກິເລດເໝືອນທຸລີ ໜ້ອຍໃນປັນຍາຈັກຂຸ ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ເປັນພັບພະສັດ (ຜູ້ສົມຄວນບັນລຸທຳ) ເປັນອະພັບພະສັດ (ຜູ້ບໍ່ສົມຄວນບັນລຸທຳ) ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ  ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດຍ່ອມເປັນໄປພາຍໃນພຣະພຸດທະຍານ

ປາແລະເຕົ່າຊະນິດໃດຊະນິດໜຶ່ງ ລວມທັງປາຕິມິ ປາຕິມິງຄະລະ ແລະປາຕິມິຕິມິງຄະລະຍ່ອມເປັນໄປຢູ່ພາຍໃນມະຫາສະມຸດ ສັນໃດ ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍ່ອມເປັນໄປພາຍໃນພຣະຍານຂອງພຣະພຸດທະເຈົ້າ ສັນນັ້ນຄືກັນ ນົກຊະນິດໃດຊະນິດໜຶ່ງ ລວມທັງຄຸດນາມວ່າເວນໄຕຍະ ຍ່ອມບິນໄປໃນຫ້ອງແຫ່ງອາກາດ ສັນໃດ ພຣະພຸດທະສາວົກທັງຫຼາຍ ຜູ້ສະເໝີກັບພຣະສາຣີບຸດດ້ວຍປັນຍາ ຍ່ອມເປັນໄປໃນສ່ວນແຫ່ງພຣະພຸດທະຍານ ສັນນັ້ນຄືກັນພຣະພຸດທະຍານຍ່ອມແຜ່ຄອບຄຸມປັນຍາຂອງເທວະດາ ແລະມະນຸດຢູ່ເຫຼົ່າບັນດິດຜູ້ເປັນກະສັດ ເປັນພາມ ເປັນຄະຫະບໍດີ ເປັນສະມະນະ ຜູ້ມີປັນຍາລະອຽດ ຮູ້ວາທະຂອງຜູ້ອື່ນ ເໝືອນນາຍຂະມັງທະນູສາມາດຍິງເນື້ອຊາຍໄດ້ ເໝືອນຈະທ່ຽວທຳລາຍທິດຖິຂອງຜູ້ອື່ນດ້ວຍປັນຍາຕົນ ບັນດິດເຫຼົ່ານັ້ນພາກັນປຸງແຕ່ງບັນຫາຍ່ອມເຂົ້າໄປເຝົ້າພຣະຕະຖາຄົດ ທູນຖາມບັນຫາທີ່ລີ້ລັບແລະປິດບັງ ບັນຫາເຫຼົ່ານັ້ນ ທີ່ພຣະຜູ້ມີພຣະພາກເຈົ້າຊົງຊັກໄຊ້ແລະຕັດແກ້ແລ້ວ ເປັນບັນຫາມີເຫດໃຫ້ຊົງສະແດງ ບັນດິດເຫຼົ່ານັ້ນຖືກດຶງດູດ ດ້ວຍການວິສັດຊະນາບັນຫາ ຈຶ່ງເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າ ໂດຍທີ່ແທ້ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮຸ່ງເຮືອງຍິ່ງດ້ວຍພຣະປັນຍາໃນໝູ່ຄົນເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຊື່ວ່າມີພຣະຈັກຂຸແຈ່ມແຈ້ງດ້ວຍປັນຍາຈັກຂຸ  ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸແຈ່ມແຈ້ງດ້ວຍພຸດທະຈັກຂຸ  ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າເມື່ອຊົງກວດເບິ່ງສັດໂລກດ້ວຍພຸດທະຈັກຂຸ ໄດ້ຊົງເຫັນສັດທັງຫຼາຍ ຜູ້ມີກິເລດເໝືອນທຸລີໜ້ອຍໃນປັນຍາຈັກຂຸ ຜູ້ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນ

ຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ບາງພວກເປັນຜູ້ເຫັນໂທດ ແລະໄພໃນປະຣະໂລກຢູ່ກໍມີ ບາງພວກເປັນຜູ້ບໍ່ເຫັນໂທດແລະໄພໃນປະຣະໂລກຢູ່ກໍມີ ເໝືອນໃນກໍບົວຂຽວ ໃນກໍບົວແດງ ຫຼືໃນກໍບົວຂາວ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳ ຈະເລີນໃນນ້ຳຂຶ້ນຕາມນ້ຳ ຈົມຢູ່ໃນນ້ຳແລະນ້ຳຫຼໍ່ລ້ຽງໄວ້ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳ ຈະເລີນໃນນ້ຳຕັ້ງຢູ່ສະເໝີຜິວນ້ຳ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳ ຈະເລີນໃນນ້ຳ ຜຸດຂຶ້ນພົ້ນຣະດັບນ້ຳ ນ້ຳບໍ່ຕິດເປື້ອນຢູ່ເລີຍ ສັນໃດ ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງກວດເບິ່ງສັດໂລກດ້ວຍພຸດທະຈັກຂຸ ໄດ້ຊົງເຫັນສັດທັງຫຼາຍຜູ້ມີກິເລດ ເໝືອນທຸລີໜ້ອຍໃນປັນຍາຈັກຂຸ ຜູ້ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ບາງພວກເປັນຜູ້ເຫັນໂທດແລະໄພໃນປະຣະໂລກຢູ່ກໍມີ ບາງພວກເປັນຜູ້ບໍ່ເຫັນໂທດ ແລະໄພໃນປະຣະໂລກຢູ່ກໍມີ ສັນນັ້ນຄືກັນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ“ບຸກຄົນນີ້ມີຣາຄະຈະຣິດ ບຸກຄົນນີ້ມີໂທສະຈະຣິດ ບຸກຄົນນີ້ມີໂມຫະຈະຣິດ ບຸກຄົນນີ້ມີວິຕົກຈະຣິດບຸກຄົນນີ້ມີສັດທາຈະຣິດ ບຸກຄົນນີ້ມີຍານຈະຣິດ” ພຣະຜູ້ມີພຣະພາກເຈົ້າຍ່ອມຕັດອະສຸພະກະຖາແກ່ບຸກຄົນຣາຄະຈະຣິດ ຕັດການຈະເລີນເມດຕາແກ່ບຸກຄົນໂທສະຈະຣິດ ຍ່ອມຊົງແນະນຳບຸກຄົນໂມຫະຈະຣິດໃຫ້ດຳຣົງຢູ່ໃນການຮ່ຳຮຽນ ການໄຕ່ຖາມ ການຟັງທຳຕາມການ ການສົນທະນາທຳຕາມການ ການຢູ່ຮ່ວມກັບຄູ ຍ່ອມຕັດອານາປານະສະຕິແກ່ບຸກຄົນວິຕົກຈະຣິດ ຕັດບອກນິມິດທີ່ໜ້າເຫຼື້ອມໃສ ຄວາມຕັດສະຣູ້ຊອບຂອງພຣະພຸດທະເຈົ້າ ຄວາມເປັນທຳດີແຫ່ງພຣະທຳການປະຕິບັດຊອບຂອງພຣະສົງ ແລະສິນຂອງຕົນແກ່ບຸກຄົນສັດທາຈະຣິດ ຍ່ອມຕັດນິມິດແຫ່ງວິປັດສະນາ ມີອາການບໍ່ທ່ຽງ ມີອາການເປັນທຸກ ມີອາການເປັນອະນັດຕາແກ່ບຸກຄົນຍານຈະຣິດ

(ສົມຈິງດັ່ງຄາຖາປະພັນວ່າ)

ຂ້າແດ່ ພຣະອົງຜູ້ມີປັນຍາດີ ມີສະມັນຕະຈັກຂຸ
ບຸຣຸດຜູ້ຢືນຢູ່ເທິງຍອດພູເຂົາສີລາລ້ວນ
ເພິ່ງເຫັນໝູ່ຊົນໄດ້ໂດຍຮອບ ແມ່ນສັນໃດ
ພຣະອົງຜູ້ໝົດຄວາມໂສກແລ້ວ
ໂຜດສະເດັດຂຶ້ນສູ່ຜາສາດຄືທຳ
ຈັກໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມເສົ້າໂສກ
ແລະຖືກຊາດຊະຣາຄອບງຳໄດ້ຊັດເຈນ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າ ມີພຣະຈັກຂຸແຈ່ມແຈ້ງດ້ວຍພຸດທະຈັກຂຸ ເປັນແນວນີ້
ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸແຈ່ມແຈ້ງດ້ວຍສະມັນຕະຈັກຂຸ ເປັນແນວໃດ?

ຄື ພຣະສັບພັນຍຸຕະຍານ ຕັດຮູ້ກວ່າ ສະມັນຕະຈັກຂຸ ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍພຣະສັບພັນຍຸຕະຍານ (ສົມຈິງດັ່ງຄາຖາປະພັນວ່າ)

ສິ່ງໃດ ໆ ໃນໄຕຣໂລກທາດນີ້
ພຣະປັນຍາຈັກຂຸຂອງພຣະຕະຖາຄົດນັ້ນ ບໍ່ເຫັນ ບໍ່ມີເລີຍ
ອັນໜຶ່ງ ທຳມະຊາດອັນໃດ ໆ ທີ່ຄວນຮູ້
ພຣະພຸດທະຍານບໍ່ຮູ້ແຈ້ງກໍບໍ່ມີ
ທຳມະຊາດທີ່ຄວນແນະນຳໃດມີຢູ່
ພຣະຕະຖາຄົດໄດ້ຊົງຮູ້ທຳມະຊາດທີ່ຄວນແນະນຳນັ້ນທັງໝົດ
ຍ້ອນເຫດນັ້ນ ພຣະຕະຖາຄົດຈຶ່ງຊື່ວ່າມີສະມັນຕະຈັກຂຸ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີພຣະຈັກຂຸແຈ່ມແຈ້ງດ້ວຍສະມັນຕະຈັກຂຸເປັນແບບນີ້ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸແຈ່ມແຈ້ງ ໄດ້ຊົງສະແດງ

ຄຳວ່າ ທຳທີ່ເປັນພະຍານ ໃນຄຳວ່າ ທຳທີ່ເປັນພະຍານ ອັນເປັນເຄື່ອງກຳຈັດອັນຕະລາຍ ອະທິບາຍວ່າ ທຳທີ່ພຣະອົງຊົງຮູ້ເອງ ທຳທີ່ປະຈັກແກ່ພຣະອົງເອງບໍ່ແມ່ນໂດຍການເຊື່ອຜູ້ອື່ນວ່າ ທຳນີ້ເປັນດັ່ງນີ້ ທຳນີ້ເປັນດັ່ງນີ້ ບໍ່ແມ່ນໂດຍການເລົ່າລື ບໍ່ແມ່ນໂດຍການຖືສືບ ໆ ກັນມາ ບໍ່ແມ່ນໂດຍການອ້າງຕຳລາ ບໍ່ແມ່ນໂດຍຕັກກະ ບໍ່ແມ່ນໂດຍການອະນຸມານ ບໍ່ແມ່ນໂດຍການຄິດຕອງຕາມແນວເຫດຜົນ ບໍ່ແມ່ນຍ້ອນເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ລວມຄວາມວ່າ ທຳທີ່ເປັນພະຍານ

## ວ່າດ້ວຍອັນຕະລາຍ ໒ ຢ່າງ

ຄຳວ່າ ອັນຕະລາຍ ໃນຄຳວ່າ ອັນເປັນເຄື່ອງກຳຈັດອັນຕະລາຍ ໄດ້ແກ່ ອັນຕະລາຍ ໒ ຢ່າງ ຄື (໑) ອັນຕະລາຍທີ່ຜາກົດ (໒) ອັນຕະລາຍທີ່ບໍ່ຜາກົດ

ອັນຕະລາຍທີ່ຜາກົດ ຄືອັນໃດ?

ຄື ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ເສືອດາວ ໝາປ່າ ງົວ ກະບື ຊ້າງ ງູ ແມງງອດ ຂີ້ເຂັບ ໂຈນ ຄົນທີ່ໄດ້ກໍ່ກຳໄວ້ ຫຼື ຍັງບໍ່ໄດ້ກໍ່ກຳໄວ້ ໂຣກທາງຕາ ໂຣກທາງຫູ ໂຣກທາງດັງ ໂຣກທາງລີ້ນ ໂຣກທາງກາຍ ໂຣກເທິງຫົວ ໂຣກຫູ ໂຣກປາກ ໂຣກແຂ້ວ ໂຣກໄອ ໂຣກຫືດ ໄຂ້ຫວັດ ໄຂ້ພິດ ໄຂ້ເຊື່ອງຊຶມ ໂຣກທ້ອງ ເປັນລົມສະຫຼົບ ລົງແດງ ຈຸກສຽດອະຫິວາຕະກະໂຣກ ໂຣກຂີ້ທູດ ຝີ ກາກ ມອງຄໍ່ ລົມບ້າໝູ ຫິດເປື່ອຍ ຫິດດ້ານ ຫິດ ຫູດໂຣກລະລອກ ໂຣກບິຊ່ານ ໂຣກເບົາຫວານ ໂຣກເຣີມ ໂຣກພຸພອງ ໂຣກຣິດສີດວງທະວານ ຄວາມເຈັບປ່ວຍທີ່

ເກີດຈາກບີ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຄວາມເຈັບປ່ວຍທີ່ເກີດຈາກລົມ ໄຂ້ສັນນິບາດ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດອຸດຈາຣະ ປວດປັດສາວະ ຄວາມເຈັບປ່ວຍທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດແລະສັດເລືອຄານ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ຜາກົດ

ອັນຕະລາຍທີ່ບໍ່ຜາກົດ ຄືອັນໃດ?

ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ກາມສັນທະນິວອນ ພະຍາບາດນິວອນ ຖີນະມິດທະນິວອນ ອຸດທັດຈະກຸກກຸດຈະນິວອນ ວິຈິກິດສານິວອນ ຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະ ມັກຂະ ປະລາສະ ອິດສາ ມັດສະຣິຍະ ມາຍາ ສາເຖີຍຍະ ຖຳພະ ສາຣຳພະ ມານະ ອະຕິມານະ ມະທະ ປະມາທະ ກິເລດທຸກຊະນິດ ທຸດຈະຣິດທຸກທາງ ຄວາມກະວົນກະວາຍທຸກຢ່າງ ຄວາມຮ້ອນຮົນທຸກສະຖານ ຄວາມເດືອດຮ້ອນທຸກ ປະການ ອະກຸສະລາພິສັງຂານທຸກປະເພດເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ບໍ່ຜາກົດ

ຄຳວ່າ ອັນຕະລາຍທັງຫຼາຍ ອະທິບາຍວ່າ ຊື່ວ່າອັນຕະລາຍ ຍ້ອນມີຄວາມໝາຍແນວໃດ

ຊື່ວ່າອັນຕະລາຍ ຍ້ອນຄອບງຳ
ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ
ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ

ທີ່ຊື່ວ່າອັນຕະລາຍ ຍ້ອນຄອບງຳ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນຍ່ອມເຂົ້າຄອບຄອງ ຢຶດຄອງ ຄອບງຳ ຖ້ວມທັບ ຮັດຄຶງ ຍ່ຳຍີບຸກຄົນນັ້ນ ທີ່ຊື່ວ່າອັນຕະລາຍ ຍ້ອນຄອບງຳ ເປັນແນວນີ້

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມເສື່ອມ ຄື ຄວາມສູນໄປແຫ່ງກຸສົນທຳທັງຫຼາຍ ກຸສົນທຳອັນໃດແດ່ ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມເສື່ອມ ຄື ເພື່ອຄວາມສູນໄປແຫ່ງກຸສົນທຳເຫຼົ່ານີ້ ຄື ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ພາດຄາດເຄື່ອນ ການປະຕິບັດທີ່ເອື້ອປະໂຫຍດການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສີນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ (ຕາ ຫູ ດັງ ລີ້ນ ກາຍ ໃຈ) ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ຄວາມໝັ່ນຈະເລີນສະຕິປັດຖານ ໔ ຄວາມໝັ່ນຈະເລີນສຳມັບປະທານ ໔ ຄວາມໝັ່ນຈະເລີນອິດທິບາດ ໔ ຄວາມໝັ່ນຈະເລີນອິນຊີ ໕ ຄວາມໝັ່ນຈະເລີນ

ພະລະ ໕ ຄວາມໝັ່ນຈະເລີນໂພດຊົງ ໗ ຄວາມໝັ່ນຈະເລີນອະຣິຍະມັກມີອົງ ໘ ທີ່ຊື່ວ່າ ອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວນີ້

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວໃດ?

ຄື ບາບອະກຸສົນທຳເຫຼົ່ານີ້ ຍ່ອມເກີດຂຶ້ນໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສປຽບເໝືອນສັດທີ່ອາໄສຮູຍ່ອມຢູ່ໃນຮູ ສັດທີ່ອາໄສນ້ຳຍ່ອມຢູ່ໃນນ້ຳ ສັດທີ່ອາໄສປ່າຍ່ອມຢູ່ໃນປ່າ ສັດທີ່ອາໄສຕົ້ນໄມ້ຍ່ອມຢູ່ເທິງຕົ້ນໄມ້ ສັນໃດ ບາບອະກຸສົນທຳເຫຼົ່ານີ້ຍ່ອມເກີດໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສ ສັນນັ້ນຄືກັນ ທີ່ຊື່ວ່າອັນຕະລາຍຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້ແດ່ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ວ່າ

"ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ"

ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກບໍ່ສະບາຍ ເປັນແນວໃດ?

ພິກຂຸທັງຫຼາຍ ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິຊ່ານໄປເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນຕາເຫັນຮູບ ບາບອະກຸສົນທຳທັງຫຼາຍ ຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ 'ຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ' ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ 'ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ'

ພິກຂຸທັງຫຼາຍ ອີກໄນໜຶ່ງ ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິຊ່ານໄປເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຫູໄດ້ຍິນສຽງ ຯລຯ ຍ້ອນດັງໄດ້ກິ່ນ ຯລຯ ຍ້ອນລີ້ນໄດ້ຊີມຣົດ ຯລຯ ຍ້ອນກາຍໄດ້ຮັບສຳຜັດ ຯລຯ ຍ້ອນໃຈຮູ້ທຳມາຣົມ ບາບອະກຸສົນທຳທັງຫຼາຍ ຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ 'ຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ' ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ 'ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ'

"ພິກຂຸທັງຫຼາຍ ແນວນີ້ແລ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກ ບໍ່ສະບາຍ" ທີ່ຊື່ວ່າ ອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້ແດ່

## ວ່າດ້ວຍທຳ ໓ ປະການ ເປັນມົນທິນພາຍໃນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ທຳ ໓ ປະການເຫຼົ່ານີ້ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ ທຳ ໓ ປະການ ອັນໃດແດ່ ຄື

໑. ໂລພະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດ ຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໒. ໂທສະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດ ຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໓. ໂມຫະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດ ຊະຄາດພາຍໃນ ເປັນຂ້າເສິກພາຍໃນ

ພິກຂຸທັງຫຼາຍ ທຳ ໓ ປະການເຫຼົ່ານີ້ແລ ຊື່ວ່າ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ"

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂລພະເຮັດໃຫ້ຈິດກຳເຣີບ ໂລພະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂລບບໍ່ຮູ້ຈັກຜົນ ຄົນໂລບບໍ່ຮູ້ຈັກເຫດ
ຄວາມໂລບຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ໂທສະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂທສະເຮັດໃຫ້ຈິດກຳເຣີບ ໂທສະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂກດບໍ່ຮູ້ຈັກຜົນ ຄົນໂກດບໍ່ຮູ້ຈັກເຫດ
ຄວາມໂກດຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ໂມຫະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂມຫະເຮັດໃຫ້ຈິດກຳເຣີບ ໂມຫະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນຫຼົງບໍ່ຮູ້ຈັກຜົນ ຄົນຫຼົງບໍ່ຮູ້ຈັກເຫດ
ຄວາມຫຼົງຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວ ນີ້ແດ່ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ມະຫາບໍພິດ ທຳ ໓ ປະການ ເມື່ອເກີດຂຶ້ນ

ພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ ທຳ ໓ ປະການອັນໃດແດ່ ຄື

໑. ໂລພະທຳເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມ ບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ
໒. ໂທສະທຳເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ
໓. ໂມຫະທຳເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ມະຫາບໍພິດ ທຳ ໓ ປະການເຫຼົ່ານີ້ແລ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ”

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະ ໂທສະ ແລະໂມຫະ ເກີດຂຶ້ນໃນຕົນ
ຍ່ອມທຳຮ້າຍບຸຣຸດຜູ້ມີຈິດຊົ່ວຊາມ
ເໝືອນຂີໄຜ່ກຳຈັດກໍໄຜ່ ສັນນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວນີ້ແດ່ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຣາຄະ ແລະ ໂທສະ ມີອັດຕະພາບນີ້ເປັນຕົ້ນເຫດ
ຄວາມບໍ່ຍິນດີກຸສົນທຳ
ຄວາມຍິນດີກາມມະຄຸນເຊິ່ງເຮັດໃຫ້ຂົນລຸກ ເກີດຈາກອັດຕະພາບນີ້
ບາບວິຕົກໃນໃຈ ເກີດຂຶ້ນຈາກອັດຕະພາບນີ້
ຍ່ອມຜູກໃຈຄົນໄວ້ ເໝືອນພວກເດັກນ້ອຍຜູກຕີນກາໄວ້ ສັນນັ້ນ

ທີ່ຊື່ວ່າ ອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບເປັນແນວ ນີ້ແດ່

ຄຳວ່າ ອັນເປັນເຄື່ອງກຳຈັດອັນຕະລາຍ ໄດ້ແກ່ ເປັນເຄື່ອງກຳຈັດອັນຕະລາຍ ຄື ເປັນເຄື່ອງລະອັນຕະລາຍ ສະງົບອັນຕະລາຍ ສະລັດຖິ້ມອັນຕະລາຍ ຣະງັບອັນຕະລາຍ ເປັນອະມະຕະນິບພານ ລວມຄວາມວ່າ ທຳທີ່ເປັນພະຍານ ອັນເປັນເຄື່ອງກຳຈັດອັນຕະລາຍ

ຄຳວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຕັດບອກປະຕິປະທາ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະ

ກາດປະຕິປະທາ ໄດ້ແກ່ ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຕັດບອກປະຕິປະທາ

ຄຳວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເປັນຄຳທີ່ພຣະພຸດທະເນຣະມິດຕັດຮຽກພຣະຜູ້ມີພຣະພາກພຸດທະເຈົ້າ ອີກໄນໜຶ່ງ ພຣະອົງຕັດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດທຳໃດ ທຳນັ້ນທັງໝົດ ເປັນທຳດີ ຈະເລີນ ງາມ ບໍ່ມີໂທດ ຄວນຊ່ອງເສບ ລວມຄວາມວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຕັດບອກປະຕິປະທາ

ຄຳວ່າ ປາຕິໂມກ ໃນຄຳວ່າ ຄື ປາຕິໂມກ ຫຼື ແມ່ນສະມາທິ ໄດ້ແກ່ ສິນອັນເປັນທີ່ເພິ່ງເປັນເບື້ອງຕົ້ນ ເປັນຄວາມປະພຶດ ເປັນຄວາມສັງລວມ ເປັນຄວາມຣະວັງ ເປັນຫົວໜ້າເປັນປະທານເພື່ອຄວາມເຖິງພ້ອມແຫ່ງທຳທີ່ເປັນກຸສົນ

ຄຳວ່າ ຫຼືແມ່ນສະມາທິ ໄດ້ແກ່ ຄວາມຕັ້ງໝັ້ນ ຄວາມດຳຣົງໝັ້ນ ຄວາມບໍ່ຄອນແຄນ ຄວາມບໍ່ກວັດແກວ່ງ ຄວາມບໍ່ຟຸ້ງຊ່ານແຫ່ງຈິດ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ລວມຄວາມວ່າ ຄື ປາຕິໂມກ ຫຼື ແມ່ນສະມາທິ ດ້ວຍເຫດນັ້ນ ພຣະພຸດທະເນຣະມິດຈຶ່ງທູນຖາມວ່າ

ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸແຈ່ມແຈ້ງ
ໄດ້ຊົງສະແດງທຳທີ່ເປັນພະຍານ ອັນເປັນເຄື່ອງກຳຈັດອັນຕະລາຍ
ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຕັດບອກປະຕິປະທາ
ຄື ປາຕິໂມກ ຫຼື ແມ່ນສະມາທິ

[໑໕໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພິກຂຸບໍ່ເພິ່ງເປັນຜູ້ມີຕາລ້ອກແລັກ
ເພິ່ງປ້ອງກັນຫູ ບໍ່ໃຫ້ໄດ້ຍິນຄາມະກະຖາ ບໍ່ເພິ່ງຕິດໃຈໃນຣົດ
ແລະ ບໍ່ເພິ່ງຢຶດຖືອັນໃດ ໆ ໃນໂລກວ່າເປັນຂອງເຮົາ

# ວ່າດ້ວຍເລື້ອງຜູ້ມີຕາລ້ອກແລັກ

ຄຳວ່າ ພິກຂຸບໍ່ເພິ່ງເປັນຜູ້ມີຕາລ້ອກແລັກ ອະທິບາຍວ່າ ພິກຂຸເປັນຜູ້ມີຕາລ້ອກແລັກ ເປັນແນວໃດ? ພິກຂຸບາງອົງໃນທຳວິໄນນີ້ເປັນຜູ້ມີຕາລ້ອກແລັກ ຄື ເປັນຜູ້ປະກອບດ້ວຍຄວາມເປັນຄົນມີຕາລ້ອກແລັກດ້ວຍຄິດວ່າ "ຮູບທີ່ຍັງບໍ່ເຄີຍເຫັນ ເຮົາຄວນເຫັນແລ້ວ ຮູບທີ່ເຮົາເຄີຍເຫັນແລ້ວເຮົາຄວນຜ່ານໄປ" ຈຶ່ງເປັນຜູ້ຂວນຂວາຍໃນການທ່ຽວໄປມາ ແລະການທ່ຽວໄປບໍ່ແນ່ນອນຈາກອາຮາມໜຶ່ງໄປສູ່ອີກອາຮາມໜຶ່ງ ຈາກອຸທະຍານໜຶ່ງໄປສູ່ອີກອຸທະຍານໜຶ່ງ ຈາກບ້ານໜຶ່ງໄປສູ່ອີກບ້ານໜຶ່ງ ຈາກນິຄົມໜຶ່ງໄປສູ່ອີກນິຄົມໜຶ່ງ ຈາກນະຄອນໜຶ່ງໄປສູ່ອີກນະຄອນໜຶ່ງ ຈາກຣັດໜຶ່ງໄປສູ່ອີກຣັດໜຶ່ງ ຈາກຊົນນະບົດ (ປະເທດ) ໜຶ່ງໄປສູ່ອີກປະເທດໜຶ່ງ ເພື່ອເບິ່ງຮູບ ພິກຂຸຊື່ວ່າເປັນຜູ້ມີຕາລ້ອກແລັກ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຂົ້າສູ່ບໍລິເວນບ້ານ ຍ່າງໄປຕາມຖະໜົນບໍ່ສັງລວມ ຍ່າງແນມເບິ່ງຊ້າງ ແນມເບິ່ງມ້າ ແນມເບິ່ງລົດ ແນມເບິ່ງພົນຍ່າງ  ແນມເບິ່ງສະຕີ ແນມເບິ່ງບຸຣຸດ ແນມເບິ່ງເດັກຊາຍ ແນມເບິ່ງເດັກຍິງ ແນມເບິ່ງຮ້ານຕະຫຼາດ ແນມເບິ່ງໜ້າມຸກເຮືອນ ແນມເບິ່ງຂ້າງເທິງ ແນມເບິ່ງຂ້າງລຸ່ມ ແນມເບິ່ງທິດນ້ອຍທິດໃຫຍ່ ພິກຂຸຊື່ວ່າເປັນຜູ້ມີຕາລ້ອກແລັກ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ເປັນຜູ້ລວບຖື ເປັນຜູ້ແຍກຖື (ອະໄວຍະວະສ່ວນຕ່າງ ໆ) ຍ່ອມບໍ່ປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ຍ່ອມບໍ່ຮັກສາຈັກຂຸນຊີ ຍ່ອມບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ພິກຂຸຊື່ວ່າເປັນຜູ້ມີຕາລ້ອກແລັກ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ຂວນຂວາຍເບິ່ງການລະຫຼິ້ນ ອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ເໝືອນສະມະນະພາມຜູ້ຈະເລີນບາງພວກບໍຣິໂພກອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ຢູ່ ຄື ການຟ້ອນ ການຂັບຮ້ອງ ການເສບດົນຕີ ການເບິ່ງມະໂຫຣະສົບ ການເລົ່ານິທານ ການຫຼິ້ນຕົບມື ການຫຼິ້ນປຸກຜີ ການຫຼິ້ນຕີກອງ ການສ້າງສາກບ້ານເມືອງໃຫ້ສວຍງາມ ການລະຫຼິ້ນຂອງຄົນຈັນທານ ການຫຼິ້ນແປ້ນໂຍກ ການລະຫຼິ້ນໜ້າສົບ ການແຂ່ງຊົນຊ້າງ ການແຂ່ງມ້າ ການແຂ່ງຊົນຄວາຍ ການແຂ່ງຊົນງົວ ການແຂ່ງຊົນແບ້ ການແຂ່ງຊົນແກະ ການແຂ່ງຕີໄກ່ ການແຂ່ງຕີນົກກະທາ ການລຳກະບີ່ກະບອງ ການຊົກມວຍ ມວຍປ້ຳ ການຮົບ ການກວດພົນສວນສະໜາມ ການຈັດກະບວນທັບ ພິກຂຸຊື່ວ່າເປັນຜູ້ມີຕາລ້ອກແລັກ ເປັນແນວນີ້ແດ່

ພິກຂຸບໍ່ເປັນຜູ້ມີຕາລ້ອກແລັກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຂົ້າສູ່ບໍລິເວນບ້ານ ເດີນທາງໄປຕາມຖະໜົນ ກໍຍ່າງຢ່າງສັງລວມ ບໍ່ແນມເບິ່ງຊ້າງ ບໍ່ແນມເບິ່ງມ້າ ບໍ່ແນມເບິ່ງລົດ ບໍ່ແນມເບິ່ງພົນຍ່າງ ບໍ່ແນມເບິ່ງສະຕີ ບໍ່ແນມເບິ່ງບຸຣຸດ ບໍ່ແນມເບິ່ງເດັກຊາຍ ບໍ່ແນມເບິ່ງເດັກຍິງ ບໍ່ແນມເບິ່ງຮ້ານຕະຫຼາດ ບໍ່ແນມເບິ່ງໜ້າ

ມຸກເຮືອນ ບໍ່ແນມເບິ່ງບ່ອນສູງ ບໍ່ແນມເບິ່ງບ່ອນຕ່ຳ ບໍ່ແນມເບິ່ງທິດນ້ອຍທິດໃຫຍ່ ພິກຂຸຊື່ວ່າບໍ່ເປັນຜູ້ມີຕາລ້ອກແລັກເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ບໍ່ລວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຍ່ອມຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ພິກຂຸຊື່ວ່າ ບໍ່ເປັນຜູ້ມີຕາລ້ອກແລັກ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ງົດເວັ້ນຈາກຄວາມຂວນຂວາຍໃນການເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ເໝືອນຢ່າງສະມະນະພາມ ຜູ້ຈະເລີນບາງພວກບໍຣິໂພກອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ກໍບໍ່ພາກັນຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ຢູ່ ຄື ການຟ້ອນ ການຂັບຮ້ອງ ການເສບດົນຕີ ການເບິ່ງມະໂຫຣະສົບ ການເລົ່ານິທານ ໆລໆ ພິກຂຸຊື່ວ່າບໍ່ເປັນຜູ້ມີຕາລ້ອກແລັກ ເປັນແນວນີ້ແດ່

ຄຳວ່າ ພິກຂຸບໍ່ເພິ່ງເປັນຜູ້ມີຕາລ້ອກແລັກ ອະທິບາຍວ່າ ເພິ່ງລະ ບັນເທົາ ເຮັດໃຫ້ ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເປັນຜູ້ມີຕາລ້ອກແລັກ ຄື ເພິ່ງເປັນຜູ້ງົດ ງົດເວັ້ນເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມເປັນຜູ້ມີຕາລ້ອກແລັກ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ພິກຂຸບໍ່ເພິ່ງເປັນຜູ້ມີຕາລ້ອກແລັກ

ຄຳວ່າ ເພິ່ງປ້ອງກັນຫູບໍ່ໃຫ້ໄດ້ຍິນຄາມະກະຖາ ອະທິບາຍວ່າ ເດຍຣັດສານກະຖາ ໓໔ ຢ່າງຕັດຮຽກວ່າ ຄາມະກະຖາ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການຮົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງຍານ ເລື້ອງບ່ອນນອນ ເລື້ອງຮອດດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງບ້ານ ເລື້ອງນິຄົມ ເລື້ອງເມືອງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງບຸຣຸດ ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະຄວາມເສື່ອມ

ຄຳວ່າ ເພິ່ງປ້ອງກັນຫູບໍ່ໃຫ້ໄດ້ຍິນຄາມະກະຖາ ອະທິບາຍວ່າ ເພິ່ງປ້ອງກັນ ຄື ຫ້າມກັ້ນ ຮັກສາ ຄຸ້ມຄອງ ປິດ ຕັດຂາດຫູບໍ່ໃຫ້ໄດ້ຍິນຄາມະກະຖາ ລວມຄວາມວ່າ ເພິ່ງປ້ອງກັນຫູບໍ່ໃຫ້ໄດ້ຍິນຄາມະກະຖາ

ຄຳວ່າ ຣົດ ໃນຄຳວ່າ ບໍ່ເພິ່ງຕິດໃຈໃນຣົດ ໄດ້ແກ່ ຣົດຈາກຮາກ ຣົດຈາກລຳຕົ້ນ ຣົດຈາກເປືອກ ຣົດຈາກໃບ ຣົດຈາກດອກ ຣົດຈາກໝາກ ຣົດສົ້ມ ຣົດຫວານ ຣົດຂົມ ຣົດເຜັດ ຣົດເຄັມ ຣົດສ່າ ຣົດເຝື່ອນ ຣົດຝາດ ຣົດແຊບ ຣົດບໍ່ແຊບ ຣົດເຢັນ ຣົດຮ້ອນ ສະມະນະພາມບາງພວກ ຍິນດີໃນຣົດ ສະມະນະພາມເຫຼົ່ານັ້ນທ່ຽວສະແຫວງຫາຣົດເລີດດ້ວຍປາຍລີ້ນ ໄດ້ຣົດສົ້ມແລ້ວກໍສະແຫວງຫາຣົດບໍ່ສົ້ມ ໄດ້ຣົດບໍ່ສົ້ມແລ້ວກໍສະແຫວງຫາຣົດສົ້ມ ໆລໆ ໄດ້ຂອງເຢັນແລ້ວກໍ

ສະແຫວງຫາຂອງຮ້ອນ ໄດ້ຂອງຮ້ອນແລ້ວກໍສະແຫວງຫາຂອງເຢັນ ສະມະນະ ພາມເຫຼົ່ານັ້ນໄດ້ຣົດໃດ ໆ ແລ້ວກໍບໍ່ຍິນດີດ້ວຍຣົດນັ້ນ ໆ ຍັງສະແຫວງຫາຣົດອື່ນ ໆ ຕໍ່ໄປອີກ ເປັນຜູ້ກຳໜັດຍິນດີ ຕິດໃຈ ສະຍົບ ມົກໝຸ່ນ ເກາະຕິດ ກ່ຽວພັນ ພົວພັນໃນຣົດທີ່ພໍໃຈ ຕັນຫາໃນຣົດນີ້ ພິກຂຸໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ฯລฯ ເຜົາດ້ວຍໄຟຄືຍານແລ້ວ ພິກຂຸນັ້ນພິຈາລະນາແລ້ວໂດຍແຍບຄາຍ ຈຶ່ງສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອຕົບແຕ່ງ ບໍ່ແມ່ນເພື່ອປະດັບ ແຕ່ສັນພຽງເພື່ອໃຫ້ຮ່າງກາຍນີ້ດຳຣົງຢູ່ ເພື່ອໃຫ້ຮ່າງກາຍນີ້ດຳເນີນໄປໄດ້ ເພື່ອກຳຈັດຄວາມລຳບາກ ເພື່ອອະນຸເຄາະແກ່ພົມມະຈັນຢ່າງດຽວເທົ່ານັ້ນ ດ້ວຍຕັ້ງໃຈວ່າ ฯລฯ ແລະຈະຢູ່ສະບາຍໄດ້ດ້ວຍວິທີການແບບນີ້ ຄົນທາບາດພຽງເພື່ອປູກເນື້ອເຍື່ອ ຕ້ອງການເພົາລົດພຽງເພື່ອຈະຂົນພາຣະໄປ ຫຼື ກິນອາຫານທີ່ປຸງຈາກຊີ້ນບຸດຕົນ ພຽງເພື່ອຈະເດີນທາງອອກຈາກທາງກັນດານໃຫ້ພົ້ນເທົ່ານັ້ນ

ສັນໃດ ພິກຂຸກໍສັນນັ້ນຄືກັນ ພິຈາລະນາໂດຍແຍບຄາຍແລ້ວ ສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ฯລฯຄວາມບໍ່ມີໂທດ ແລະຢູ່ສະບາຍໄດ້ດ້ວຍວິທີການແບບນີ້ ຍ່ອມລະ ບັນເທົາ ເຮັດໃຫ້ໝົດສິ້ນໄປໃຫ້ເຖິງຄວາມບໍ່ມີອີກເຊິ່ງຕັນຫາໃນຣົດ ເປັນຜູ້ງົດແລ້ວ ງົດເວັ້ນແລ້ວ ເວັ້ນຂາດແລ້ວອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວກັບຕັນຫາໃນຣົດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງຕິດໃຈໃນຣົດ

ຄຳວ່າ ແລະບໍ່ເພິ່ງຍຶດຖືອັນໃດ ໆ ໃນໂລກວ່າເປັນຂອງເຮົາ ອະທິບາຍວ່າ ຄຳວ່າຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາ ດ້ວຍອຳນາດທິດຖິ ฯລฯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ฯລฯ ນີ້ຊື່ວ່າ ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ພິກຂຸລະຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ເພິ່ງຍຶດຖື ຄື ບໍ່ຍຶດບໍ່ຍຶດໝັ້ນ ບໍ່ຖືໝັ້ນຕາວ່າເປັນຂອງເຮົາ ฯລฯ ບໍ່ຖືໝັ້ນຫູ ฯລฯ ດັງ ฯລฯ ລີ້ນ ฯລฯ ກາຍ ฯລฯ ຮູບ ฯລฯ ສຽງ ฯລฯ ກິ່ນ ฯລฯ ຣົດ ฯລฯໂຜດຖັບພະ ฯລฯ ຕະກູນ ฯລฯ ໝູ່ຄະນະ ฯລฯ ອາວາດ ฯລฯ ລາບ ฯລฯ ຍົດ ฯລฯ ສັນເສີນ ฯລฯ ສຸກ ฯລฯ ຈີວອນ ฯລฯບິນທະບາດ ฯລฯ ເສນາສະນະ ฯລฯ ຄິລານະປັດໄຈເພສັດບໍຣິຂານ ฯລฯ ກາມທາດ ฯລฯ ຮູບທາດ ฯລฯ ອະຮູບທາດ ฯລฯ ກາມພົບ ฯລฯ ຮູບພົບ ฯລฯ ອະຮູບພົບ ฯລฯ ສັນຍາພົບ ฯລฯ ອະສັນຍາພົບ ฯລฯ ເນວະສັນຍານາສັນຍາພົບ ฯລฯ ເອກະໂວກາຣະພົບ ฯລฯ ຈະຕຸໂວກາຣະພົບ ฯລฯ ປັນຈະໂວກາຣະພົບ ฯລฯ ອະດີດ ฯລฯ ອະນາຄົດ ฯລฯ ປັດຈຸບັນວ່າເປັນຂອງເຮົາ ບໍ່ເພິ່ງຍຶດຖື ຄື ບໍ່ຍຶດ ບໍ່ຍຶດໝັ້ນ ບໍ່ຖືໝັ້ນ ຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດໂຜດຖັບພະທີ່ຮັບຮູ້ ທຳມາຣົມທີ່ເພິ່ງຮູ້ແຈ້ງວ່າເປັນຂອງເຮົາ

ຄຳວ່າ ອັນໃດ ໆ ໄດ້ແກ່ ອັນໃດທີ່ເປັນຮູບ ເປັນເວທະນາ ເປັນສັນຍາ ເປັນສັງຂານ ເປັນວິນຍານ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ฯລฯ ອາຍະຕະນະໂລກ ລວມຄວາມວ່າ ແລະບໍ່ເພິ່ງຍຶດຖືອັນໃດ ໆ ໃນໂລກວ່າ ເປັນຂອງເຮົາ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ພິກຂຸບໍ່ເພິ່ງເປັນຜູ້ມີຕາລັອກແລັກ
ເພິ່ງປ້ອງກັນຫູບໍ່ໃຫ້ໄດ້ຍິນຄາມະກະຖາ ບໍ່ເພິ່ງຕິດໃຈໃນຣົດ
ແລະບໍ່ເພິ່ງຍຶດຖືອັນໃດ ໆ ໃນໂລກວ່າເປັນຂອງເຮົາ

[໑໘໗] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ເມື່ອໃດ ພິກຂຸຖືກຜັດສະກະທົບ
ເມື່ອນັ້ນທ່ານກໍບໍ່ເພິ່ງເຮັດຄວາມຮ່ຳໄຮໃນບ່ອນໃດ ໆ
ບໍ່ເພິ່ງຄາດຫວັງພົບ ແລະບໍ່ເພິ່ງສັ່ນສະທ້ານ
ຍ້ອນອາລົມທີ່ເປັນຕາຍ້ານ

## ວ່າດ້ວຍໂຣກຕ່າງ ໆ

ຄຳວ່າ ເມື່ອໃດ ພິກຂຸຖືກຜັດສະກະທົບ ອະທິບາຍວ່າ ພິກຂຸຖືກຜັດສະກະທົບ ຄື ຖືກໂຣກກະທົບ ຄອບງຳ ກຸ້ມຣຸມ ປະກອບເຂົ້າ ໄດ້ແກ່ ຖືກໂຣກທາງຕາກະທົບ ຄອບງຳກຸ້ມຣຸມປະກອບເຂົ້າ ໂຣກທາງຫູ ฯລฯ ໂຣກທາງດັງ ฯລฯ ໂຣກທາງລີ້ນ ฯລฯ ໂຣກທາງກາຍ ฯລฯໂຣກຫົວ ฯລฯ ໂຣກຫູ ฯລฯ ໂຣກປາກ ฯລฯ ໂຣກແຂ້ວ ฯລฯ ໂຣກໄອ ฯລฯ ໂຣກຫືດ ฯລฯ ໄຂ້ຫວັດ ฯລฯ ໄຂ້ພິດ ฯລฯໄຂ້ເຊື່ອງຊຶມ ฯລฯ ໂຣກທ້ອງ ฯລฯ ເປັນລົມສະຫຼົບ ฯລฯ ລົງແດງ ฯລฯ ຈຸກສຽດ ฯລฯ ອະຫິວາຕະກະໂຣກ ฯລฯ ໂຣກຂີ້ທູດ ฯລฯ ຝີ ฯລฯ ກາກ ฯລฯ ມອງຄໍ່ ฯລฯ ລົມບ້າໝູ ฯລฯ ຫິດເປື່ອຍ ฯລฯ ຫິດດ້ານ ฯລฯ ຫິດ ฯລฯ ຫູດ ฯລฯ ໂຣກລະລອກ ฯລฯ ໂຣກບິຊ່ານ ฯລฯ ໂຣກເບົາຫວານ ฯລฯ ໂຣກເຣີມ ฯລฯ ໂຣກພຸພອງ ฯລฯ ໂຣກຣິດສີດວງທະວານ ฯລฯຄວາມເຈັບປ່ວຍທີ່ເກີດຈາກບີ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກລົມ ฯລฯ ໄຂ້ສັນນິບາດ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ฯລฯ ຄວາມໜາວ ฯລฯ ຄວາມຮ້ອນ ฯລฯ ຄວາມຫິວ ฯລฯ ຄວາມກະຫາຍ ฯລฯ ປວດອຸດຈາຣະ ฯລฯ ປວດປັດສາວະ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກສຳຜັດ

ແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ກະທົບ ຄອບງໍາ ກຸ້ມຮຸມປະກອບເຂົ້າ ລວມຄວາມວ່າ ເມື່ອໃດ ພິກຂຸຖືກຜັດສະກະທົບ

ຄໍາວ່າ ເມື່ອນັ້ນທ່ານກໍບໍ່ເພິ່ງເຮັດຄວາມຮໍ່າໄຮໃນບ່ອນໃດ ໆ ອະທິບາຍວ່າບໍ່ເພິ່ງເຮັດ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນເຊິ່ງຄວາມຈົ່ມເພີ້ຄວາມຮໍ່າໄຮ ຄື ກິຣິຍາທີ່ຈົ່ມເພີ້ ກິຣິຍາທີ່ຮໍ່າໄຮ ພາວະທີ່ຈົ່ມເພີ້ ພາວະທີ່ຄໍ່າຄວນ ການເວົ້າພ່ານ ການເວົ້າເພີ້ ການເວົ້າໂລເລ ຄວາມພໍ່າເພີ້ ກິຣິຍາທີ່ພໍ່າເພີ້ ພາວະທີ່ພໍ່າເພີ້

ຄໍາວ່າ ໃນບ່ອນໃດ ໆ ໄດ້ແກ່ ໃນບ່ອນໃດ ຄື ທີ່ໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນ ແລະພາຍນອກ ລວມຄວາມວ່າ ເມື່ອນັ້ນ ທ່ານກໍບໍ່ເພິ່ງເຮັດຄວາມຮໍ່າໄຮໃນບ່ອນໃດ ໆ

ຄໍາວ່າ ບໍ່ເພິ່ງຄາດຫວັງພົບ ໄດ້ແກ່ ບໍ່ເພິ່ງຫວັງ ບໍ່ເພິ່ງມຸ້ງຫວັງ ບໍ່ເພິ່ງຄາດຫວັງການພົບ ຮູບພົບ ອະຮູບພົບ ລວມຄວາມວ່າ ບໍ່ເພິ່ງຄາດຫວັງພົບ

## ວ່າດ້ວຍໄພແລະຄວາມບໍ່ກ້າຢ້ານ

ຄໍາວ່າ ແລະບໍ່ເພິ່ງກະສັບກະສ່າຍຍ້ອນອາລົມທີ່ເປັນຕາຢ້ານ ອະທິບາຍວ່າ

ຄໍາວ່າ ຄວາມເປັນຕາຢ້ານ ໄດ້ແກ່ ທັງໄພແລະຄວາມບໍ່ກ້າຢ້ານ ມີຄວາມໝາຍຢ່າງດຽວກັນນັ້ນເອງ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ໄພ ຄວາມບໍ່ກ້າຢ້ານນັ້ນ ຄື ສິ່ງນີ້ເປັນແນ່ ບຸກຄົນບໍ່ເພິ່ງລະເສີຍ ມັນກໍຈະມາຫາ ໄພນັ້ນຮຽກວ່າ ມີວັດຖຸພາຍນອກເປັນອາລົມ ຄື ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ເສືອດາວ ໝາປ່າ ງົວ ກະບື ມ້າ ຊ້າງ ງູ ແມງງອດ ຂີ້ເຂັບ ໂຈນ ຫຼື ຄົນທີ່ໄດ້ກໍ່ກໍາໄວ້ ຫຼື ຍັງບໍ່ໄດ້ກໍ່ກໍາໄວ້

ອີກໄນໜຶ່ງ ໂດຍຄວາມໝາຍຕ່າງກັນ ຄວາມຢ້ານ ອາການຢ້ານ ຄວາມຫວາດຫວັ່ນຂົນພອງສະຫຍອງເກົ້າ ຄວາມຫວາດສຽວ ຄວາມສະດຸ້ງແຫ່ງຈິດ ທີ່ເກີດຂຶ້ນພາຍໃນ ມີຈິດເປັນສະມຸດຖານ ຮຽກວ່າ ໄພ ຄື ຊາຕິໄພ ຊະຣາໄພ ພະຍາທິໄພ ມໍຣະນະໄພ ຣາຊະໄພ ໂຈຣະໄພ ອັກຄີໄພ ອຸທະກະໄພ ອັດຕານຸວາທະໄພ (ໄພເກີດຈາກການຕິຕຽນຕົນ) ປະຣະນຸວາທະໄພ (ໄພເກີດຈາກການຕິຕຽນຂອງຜູ້ອື່ນ) ທັນດະໄພ (ໄພຈາກອາຍາ) ທຸຄະຕິໄພ (ໄພໃນທຸກຄະຕິ) ອູມິໄພ (ໄພຈາກຄື້ນ) ກຸມພີລະໄພ (ໄພຈາກແຂ້) ອາວັດຕະໄພ (ໄພຈາກນໍ້າວົນ) ສຸງສຸກາຣະໄພ (ໄພຈາກປາຮ້າຍ) ອາຊີວິກະໄພ (ໄພຈາກການຫາລ້ຽງຊີບ) ອະສິໂລກະໄພ (ໄພຄືຄວາມເສື່ອມເສຍຊື່ສຽງ) ປະຣິສະສາຍະສາຣັດຊະໄພ (ໄພຈາກຄວາມເກງກົວໃນຊຸມຊົນ) ທຸຄະຕິໄພ ເຫດທີ່ເປັນຕາຢ້ານ ຄວາມຫວາດສຽວ ຂົນພອງສະຫຍອງເກົ້າ ໃຈຫວາດສຽວ ຄວາມສະດຸ້ງ

ຄໍາວ່າ ແລະບໍ່ເພິ່ງກະສັບກະສ່າຍຍ້ອນອາລົມທີ່ເປັນຕາຢ້ານ ອະທິບາຍວ່າ ພິກຂຸເຫັນ ຫຼື ໄດ້ຍິນສິ່ງທີ່ໜ້າສະພຶງຢ້ານ ກໍບໍ່ເພິ່ງຫວັ່ນໄຫວ ບໍ່ເພິ່ງສັ່ນເຊນ ບໍ່ເພິ່ງກະສັບກະສ່າຍ

ຄື ບໍ່ຫວາດສຽວ ບໍ່ເກງກົວ ບໍ່ຢ້ານກົວ ບໍ່ເຖິງຄວາມສະດຸ້ງ ໄດ້ແກ່ ເພິ່ງເປັນຜູ້ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ເພິ່ງເປັນຜູ້ລະໄພ ແລະຄວາມບໍ່ກ້າໄດ້ແລ້ວ ໝົດຄວາມຂົນພອງສະຫຍອງຫົວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເມື່ອໃດ ພິກຂຸຖືກຜັດສະກະທົບ
ເມື່ອນັ້ນທ່ານກໍບໍ່ເພິ່ງເຮັດຄວາມຮ່ຳໄຮໃນບ່ອນໃດ ໆ
ບໍ່ເພິ່ງຄາດຫວັງພົບ ແລະບໍ່ເພິ່ງກະສັບກະສ່າຍ
ຍ້ອນອາລົມທີ່ເປັນຕາຢ້ານ

[໑໕໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸໄດ້ເຂົ້າກໍດີ ນ້ຳກໍດີ ຂອງຂົບຫຍ້ຳກໍດີ ຜ້າກໍດີແລ້ວບໍ່ຄວນທຳການສະສົມ ເມື່ອບໍ່ໄດ້ເຂົ້າເປັນຕົ້ນເຫຼົ່ານັ້ນກໍບໍ່ເພິ່ງສະດຸ້ງ

## ວ່າດ້ວຍເຂົ້ານ້ຳແລະຂອງຂົບຫຍ້ຳ

ຄຳວ່າ ເຂົ້າ ໃນຄຳວ່າ ຯລຯ ເຂົ້າກໍດີ ນ້ຳກໍດີ ຂອງຂົບຫຍ້ຳກໍດີ ຜ້າກໍດີ ໄດ້ແກ່ ເຂົ້າສຸກເຂົ້າໜົມກຸມມາດ (ເຂົ້າໜົມສົດ) ເຂົ້າຜົງ (ສັດຕຸ) ປາ ຊີ້ນ

ຄຳວ່າ ນ້ຳ ໄດ້ແກ່ ນ້ຳປານະ ໘ ຢ່າງ ຄື

| | |
|---|---|
| ໑. ນ້ຳໝາກມ່ວງ | ໔. ນ້ຳຫວ້າ |
| ໒. ນ້ຳກ້ວຍມີເມັດ | ໔. ນ້ຳກ້ວຍບໍ່ມີເມັດ |
| ໕. ນ້ຳໝາກຊາງ | ໖. ນ້ຳໝາກຈັບຫຼືນ້ຳອະງຸ່ນ |
| ໗. ນ້ຳເຫງົ້າບົວ | ໘. ນ້ຳໝາກຜາງ ຫຼືນ້ຳລິ້ນຈີ່ |

ນ້ຳປານະອີກ ໘ ຢ່າງ ຄື

| | |
|---|---|
| ໑. ນ້ຳໝາກຄໍ້ | ໔. ນ້ຳໝາກເລັບຮຸ້ງ |
| ໒. ນ້ຳໝາກກະທັນ | ໔. ນ້ຳມັນ |
| ໕. ນ້ຳປະສົມນ້ຳມັນ | ໖. ນ້ຳເຂົ້າຕົ້ມ |
| ໗. ນ້ຳນົມ | ໘. ນ້ຳຣົດ |

ຄຳວ່າ ຂອງຂົບຫຍ້ຳ ໄດ້ແກ່ ຂອງຂົບຫຍ້ຳເຮັດດ້ວຍແປ້ງ ຂອງຂົບຫຍ້ຳເຮັດເປັນເຂົ້າໜົມ ຂອງຂົບຫຍ້ຳເຮັດດ້ວຍຫົວ (ຮາກ) ຂອງຂົບຫຍ້ຳເຮັດດ້ວຍເປືອກໄມ້ ຂອງຂົບຫຍ້ຳເຮັດດ້ວຍໃບໄມ້ຂອງຂົບຫຍ້ຳເຮັດດ້ວຍດອກໄມ້ ຂອງຂົບຫຍ້ຳເຮັດດ້ວຍໝາກໄມ້

ຄຳວ່າ ຜ້າ ໄດ້ແກ່ ຈີວອນ ໖ ຊະນິດ ຄື

| | | | |
|---|---|---|---|
| ໑. ໂຂມະ | (ຜ້າເປືອກໄມ້) | ໔. ກັບປາສິກະ | (ຜ້າຝ້າຍ) |
| ໒. ໂກເສີຍຍະ | (ຜ້າໄໝ) | ໕. ກຳພະລະ | (ຜ້າຂົນສັດ) |
| ໓. ສານະ | (ຜ້າປ່ານ) | ໖. ພັງຄະ | (ຜ້າທີ່ເຮັດດ້ວຍວັດສະດຸປະສົມກັນ) |

ລວມຄວາມວ່າ ໆລໆ ເຂົ້າກໍດີ ນ້ຳກໍດີ ຂອງຂົບຫຍ້ຳກໍດີ ຜ້າກໍດີ

ຄຳວ່າ ໄດ້ແລ້ວ ໃນຄຳວ່າ ໄດ້ ໆລໆ ແລ້ວ ບໍ່ຄວນທຳການສະສົມ ໄດ້ແກ່ ໄດ້ແລ້ວ ຄື ໄດ້ຮັບແລ້ວ ສົມຫວັງແລ້ວ ປະສົບແລ້ວ ໄດ້ສະເພາະແລ້ວ ບໍ່ແມ່ນດ້ວຍການເວົ້າຕົວະ ບໍ່ແມ່ນດ້ວຍການເວົ້າລຽບຄຽງ ບໍ່ແມ່ນດ້ວຍການທຳນິມິດ ບໍ່ແມ່ນດ້ວຍການກຳຈັດຄຸນເຂົາ ບໍ່ແມ່ນດ້ວຍການຕໍ່ລາບດ້ວຍລາບ ບໍ່ແມ່ນດ້ວຍການໃຫ້ໄມ້ ບໍ່ແມ່ນດ້ວຍການໃຫ້ໄມ້ໄຜ່ ບໍ່ແມ່ນດ້ວຍການໃຫ້ໃບໄມ້ ບໍ່ແມ່ນດ້ວຍການໃຫ້ດອກໄມ້ ບໍ່ແມ່ນດ້ວຍການໃຫ້ໝາກໄມ້ ບໍ່ແມ່ນດ້ວຍການໃຫ້ນ້ຳອາບ ບໍ່ແມ່ນດ້ວຍການໃຫ້ແປ້ງຝຸ່ນ ບໍ່ແມ່ນດ້ວຍການໃຫ້ດິນສໍພອງ ບໍ່ແມ່ນດ້ວຍການໃຫ້ໄມ້ສີແຂ້ວ ບໍ່ແມ່ນດ້ວຍການໃຫ້ນ້ຳບ້ວນປາກ ບໍ່ແມ່ນດ້ວຍຄຳເວົ້າມຸ້ງໃຫ້ເຂົາຮູ້ຈັກຕົນ ບໍ່ແມ່ນດ້ວຍຄຳເວົ້າເຫຼາະແຫຼະເໝືອນແກງຖົ່ວ ບໍ່ແມ່ນດ້ວຍກິຣິຍາປະຈົບ ບໍ່ແມ່ນດ້ວຍການຂັດຕັ່ງຕີສະນິດເຂົາ ບໍ່ແມ່ນດ້ວຍວິຊາເບິ່ງພື້ນທີ່ ບໍ່ແມ່ນດ້ວຍເດຍຣັດສານວິຊາບໍ່ແມ່ນດ້ວຍວິຊາທຳນາຍລັກສະນະອະໄວຍະວະ ບໍ່ແມ່ນດ້ວຍວິຊາເບິ່ງເລີກຍາມ ບໍ່ແມ່ນດ້ວຍການຍ່າງເຮັດໜ້າທີ່ທູດ ບໍ່ແມ່ນດ້ວຍການຍ່າງເປັນຄົນຮັບໃຊ້ ບໍ່ແມ່ນດ້ວຍການຍ່າງສື່ສານ ບໍ່ແມ່ນດ້ວຍເວດຊະກຳ ບໍ່ແມ່ນດ້ວຍນະວະກຳ ບໍ່ແມ່ນດ້ວຍການໃຊ້ກ້ອນເຂົ້າຕອບແທນກ້ອນເຂົ້າ ບໍ່ແມ່ນດ້ວຍການໃຫ້ ແລະການເພີ່ມໃຫ້ ແຕ່ໄດ້ແລ້ວ ຄື ໄດ້ຮັບແລ້ວ ສົມຫວັງແລ້ວ ປະສົບແລ້ວ ໄດ້ສະເພາະແລ້ວ ໂດຍຊອບທຳ ໂດຍຍຸດຕິທຳ ລວມຄວາມວ່າ ໄດ້ແລ້ວ

ຄຳວ່າ ບໍ່ຄວນທຳການສະສົມ ໄດ້ແກ່ ບໍ່ຄວນເຮັດ  ຄື ບໍ່ຄວນໃຫ້ເກີດ ບໍ່ຄວນໃຫ້ເກີດຂຶ້ນ ບໍ່ຄວນໃຫ້ບັງເກີດ ບໍ່ຄວນໃຫ້ບັງເກີດຂຶ້ນ ເຊິ່ງການສະສົມເຂົ້າສຸກ ການສະສົມນ້ຳດື່ມການສະສົມຜ້າ ການສະສົມຍານ ການສະສົມບ່ອນນອນ ການສະສົມຂອງຫອມ ການສະສົມອາມິດ ລວມຄວາມວ່າ ໄດ້ ໆລໆ ແລ້ວ ບໍ່ຄວນທຳການສະສົມ

ຄຳວ່າ ເມື່ອບໍ່ໄດ້ເຂົ້າເປັນຕົ້ນເຫຼົ່ານັ້ນກໍບໍ່ເພິ່ງສະດຸ້ງ ອະທິບາຍວ່າ ພິກຂຸບໍ່ເພິ່ງຫວາດສຽວ ບໍ່ເພິ່ງເກງກົວ ບໍ່ເພິ່ງຢ້ານກົວ ບໍ່ເພິ່ງເຖິງຄວາມສະດຸ້ງຢ້ານວ່າ ເຮົາບໍ່ໄດ້ເຂົ້າສຸກ ບໍ່ໄດ້ນ້ຳດື່ມ ບໍ່ໄດ້ຜ້າ ບໍ່ໄດ້ຕະກູນ ບໍ່ໄດ້ໝູ່ຄະນະ ບໍ່ໄດ້ອາວາດ ບໍ່ໄດ້ລາບ  ບໍ່ໄດ້ຍົດ ບໍ່ໄດ້ສັນເສີນ ບໍ່ໄດ້ສຸກ ບໍ່ໄດ້ຈີວອນ ບໍ່ໄດ້ບິນທະບາດ ບໍ່ໄດ້ເສນາສະນະ ບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານ ບໍ່ໄດ້ຜູ້ປິ່ນປົວເວລາເຈັບປ່ວຍ ບໍ່ເປັນຜູ້ມີຊື່ສຽງຜາກົດ ຄື ເພິ່ງເປັນຜູ້ບໍ່ຢ້ານບໍ່ຫວາດສຽວ ບໍ່ສະດຸ້ງບໍ່ໜີ ເພິ່ງເປັນຜູ້ລະໄພ ແລະຄວາມບໍ່ກ້າຢ້ານໄດ້ແລ້ວ ໝົດຄວາມຂົນພອງສະຫຍອງຫົວຢູ່ ລວມ

ຄວາມວ່າ ເມື່ອບໍ່ໄດ້ເຂົ້າເປັນຕົ້ນເຫຼົ່ານັ້ນກໍບໍ່ເພິ່ງສະດຸ້ງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸໄດ້ເຂົ້າກໍດີ ນໍ້າກໍດີ ຂອງຂົບຫຍໍ້າກໍດີ ຜ້າກໍດີແລ້ວ
ບໍ່ຄວນທໍາການສະສົມ ເມື່ອບໍ່ໄດ້ເຂົ້າເປັນຕົ້ນເຫຼົ່ານັ້ນກໍບໍ່ເພິ່ງສະດຸ້ງ

[໑໗໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸເພິ່ງເປັນຜູ້ມີຊານ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ
ເພິ່ງເວັ້ນຈາກຄວາມຄະນອງ ບໍ່ເພິ່ງຜະໝາດ
ແລະເພິ່ງຢູ່ໃນບ່ອນນັ່ງບ່ອນນອນທີ່ມີສຽງໜ້ອຍ

## ວ່າດ້ວຍຜູ້ມີຊານ

ຄໍາວ່າ ເພິ່ງເປັນຜູ້ມີຊານ ໃນຄໍາວ່າ ພິກຂຸເພິ່ງເປັນຜູ້ມີຊານ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ ເປັນຜູ້ມີຊານ ດ້ວຍປະຖົມຊານແດ່ ດ້ວຍທຸຕິຍະຊານແດ່ ດ້ວຍຕະຕິຍະຊານແດ່ ດ້ວຍຈະຕຸດຖະຊານແດ່ ດ້ວຍຊານທີ່ມີວິຕົກ ແລະວິຈານເປັນອາລົມແດ່ ດ້ວຍຊານທີ່ບໍ່ມີວິຕົກມີພຽງວິຈານເປັນອາລົມແດ່ ດ້ວຍຊານທີ່ບໍ່ມີວິຕົກ ແລະວິຈານເປັນອາລົມແດ່ ດ້ວຍຊານທີ່ມີປີຕິເປັນອາລົມແດ່ ດ້ວຍຊານທີ່ບໍ່ມີປີຕິເປັນອາລົມແດ່ ດ້ວຍຊານທີ່ປະກອບດ້ວຍປີຕິແດ່ ດ້ວຍຊານທີ່ປະກອບດ້ວຍຄວາມແຊ່ມຊື່ນແດ່ ດ້ວຍຊານທີ່ປະກອບດ້ວຍສຸກແດ່ ດ້ວຍຊານທີ່ປະກອບດ້ວຍອຸເປກຂາແດ່ ດ້ວຍຊານທີ່ເປັນສູນຍະຕະແດ່ ດ້ວຍຊານທີ່ເປັນອະນິມິດຕະແດ່ ດ້ວຍຊານທີ່ເປັນອັບປະນິຫິຕະແດ່ ດ້ວຍຊານທີ່ເປັນໂລກິຍະແດ່ ດ້ວຍຊານທີ່ເປັນໂລກຸດຕະຣະແດ່ ຄື ເປັນຜູ້ຍິນດີໃນຊານ ຂວນຂວາຍໃນຄວາມເປັນຜູ້ມີຈິດມີອາລົມໜຶ່ງດຽວ ໜັກໃນປະໂຫຍດຂອງຕົນ ລວມຄວາມວ່າ ເພິ່ງເປັນຜູ້ມີຊານ

ຄໍາວ່າ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ ພິກຂຸເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວໃດ?

ຄື ພິກຂຸບາງອົງໃນທໍາວິໄນນີ້ ເປັນຜູ້ມີຕີນຢູ່ບໍ່ສຸກ ຄື ປະກອບດ້ວຍຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ຈຶ່ງເປັນຜູ້ຂວນຂວາຍໃນການທ່ຽວໄປດົນນານ ການທ່ຽວໄປບໍ່ມີຈຸດໝາຍແນ່ນອນ ຈາກອາຣາມໜຶ່ງໄປສູ່ອີກອາຣາມໜຶ່ງ ຈາກອຸທະຍານໜຶ່ງໄປສູ່ອີກອຸທະຍານໜຶ່ງ ຈາກບ້ານໜຶ່ງໄປສູ່ອີກບ້ານໜຶ່ງ ຈາກນິຄົມໜຶ່ງໄປສູ່ອີກນິຄົມໜຶ່ງ ຈາກນະຄອນໜຶ່ງໄປສູ່ອີກນະຄອນໜຶ່ງ ຈາກຣັດໜຶ່ງໄປສູ່ອີກຣັດໜຶ່ງ ຈາກຊົນນະບົດໜຶ່ງໄປສູ່ອີກຊົນນະບົດໜຶ່ງ ພິກຂຸຊື່ວ່າ ເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸປະກອບດ້ວຍຄວາມເປັນຜູ້ມີຕີນຢູ່ບໍ່ສຸກພາຍໃນສັງຄາຣາມ ບໍ່ແມ່ນຍ້ອນເຫດແຫ່ງປະໂຫຍດ ບໍ່ແມ່ນຍ້ອນເຫດແຫ່ງການກະທໍາ ແຕ່ເປັນຜູ້ຟຸ້ງຊ່ານ ມີຈິດໃຈບໍ່ສະ

ງົບຍ່າງຈາກບໍລິເວນໜຶ່ງໄປສູ່ອີກບໍລິເວນໜຶ່ງ ຈາກວິຫານໜຶ່ງໄປສູ່ອີກວິຫານໜຶ່ງ ຈາກເຮືອນຫຼັງຄາດ້ານດຽວໄປສູ່ເຮືອນຫຼັງຄາດ້ານດຽວອີກແຫ່ງໜຶ່ງ ຈາກຜາສາດໜຶ່ງໄປສູ່ອີກຜາສາດໜຶ່ງ ຈາກເຮືອນໂລ້ນຫຼັງໜຶ່ງໄປສູ່ເຮືອນໂລ້ນອີກຫຼັງໜຶ່ງ ຈາກຖ້ຳໜຶ່ງໄປສູ່ອີກຖ້ຳໜຶ່ງ ຈາກທີ່ຫຼົບຫຼີກແຫ່ງໜຶ່ງໄປສູ່ທີ່ຫຼົບຫຼີກອີກແຫ່ງໜຶ່ງ ຈາກກຸດຕິໜຶ່ງໄປສູ່ອີກກຸດຕິໜຶ່ງ ຈາກເຮືອນຍອດແຫ່ງໜຶ່ງໄປສູ່ເຮືອນຍອດອີກແຫ່ງໜຶ່ງ ຈາກປ້ອມໜຶ່ງໄປສູ່ອີກປ້ອມໜຶ່ງຈາກຜາມ ໜຶ່ງໄປສູ່ອີກຜາມໜຶ່ງ ຈາກເຮືອນທີ່ພັກແຫ່ງໜຶ່ງໄປສູ່ເຮືອນທີ່ພັກອີກແຫ່ງໜຶ່ງ ຈາກໂຮງເກັບຂອງແຫ່ງໜຶ່ງໄປສູ່ໂຮງເກັບຂອງອີກແຫ່ງໜຶ່ງ ຈາກຫໍສັນແຫ່ງໜຶ່ງໄປສູ່ຫໍສັນອີກແຫ່ງໜຶ່ງ ຈາກມົນທົນແຫ່ງໜຶ່ງໄປສູ່ມົນທົນອີກແຫ່ງໜຶ່ງ ຈາກເຫງົ້າຕົ້ນໄມ້ແຫ່ງໜຶ່ງໄປສູ່ເຫງົ້າຕົ້ນໄມ້ອີກແຫ່ງໜຶ່ງ ຍ່າງໄປທີ່ທີ່ພວກພິກຂຸນັ່ງກັນຢູ່ ເປັນທີ ໔ ຂອງພິກຂຸ ໑ ອົງ ເປັນທີ ໓ ຂອງພິກຂຸ ໔ ອົງ ຫຼືເປັນທີ ໕ ຂອງພິກຂຸ ໓ ອົງ ໃນບ່ອນນັ້ນໆ ເວົ້າເລື່ອງໂລເລຫຼາຍໃນບ່ອນນັ້ນ ຄື ເລື່ອງພຣະຣາຊາ ເລື່ອງໂຈນ ເລື່ອງມະຫາອຳມາດ ເລື່ອງກອງທັບ ເລື່ອງໄພເລື່ອງການຮົບ ເລື່ອງເຂົ້າ ເລື່ອງນ້ຳ ເລື່ອງຜ້າ ເລື່ອງຍານ ເລື່ອງບ່ອນນອນ ເລື່ອງຮວດດອກໄມ້ ເລື່ອງຂອງຫອມ ເລື່ອງຍາດພີ່ນ້ອງ ເລື່ອງບ້ານ ເລື່ອງນິຄົມ ເລື່ອງເມືອງ ເລື່ອງຊົນນະບົດ ເລື່ອງສະຕີ ເລື່ອງບຸຣຸດ ເລື່ອງຄົນກ້າຫານ ເລື່ອງຮ່ອມ ເລື່ອງທ່ານ້ຳ ເລື່ອງຄົນທີ່ລ່ວງລັບໄປແລ້ວ ເລື່ອງຕ່າງ ໆ ເລື່ອງໂລກ ເລື່ອງທະເລ ເລື່ອງຄວາມຈະເລີນ ແລະຄວາມເສື່ອມ ພິກຂຸຊື່ວ່າເປັນຜູ້ມີຕີນຢູ່ບໍ່ສຸກເປັນແນວນີ້ແດ່

## ວ່າດ້ວຍເລື່ອງຜູ້ມີຕີນຢູ່ບໍ່ສຸກ

ຄຳວ່າ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ມີໃຈເປັນອິດສະຫຼະ(ຈາກກິເລດ) ຢູ່ ຄື ປະພຶດ ປະພຶດໂດຍເອື້ອເຟື້ອ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງມີຊີວິດໃຫ້ດຳເນີນໄປ ເພິ່ງເປັນຜູ້ພໍໃຈໃນຄວາມຫຼົບຫຼີກ ຍິນດີໃນຄວາມຫຼົບຫຼີກ ໝັ່ນປະກອບຄວາມສະງົບແຫ່ງຈິດພາຍໃນ ບໍ່ຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນການຢູ່ໃນເຮືອນວ່າງມີຊານ ເປັນຜູ້ຍິນດີໃນຊານ ຂວນຂວາຍໃນຄວາມເປັນຜູ້ມີຈິດ ມີອາລົມໜຶ່ງດຽວ ໜັກໃນປະໂຫຍດຂອງຕົນ ລວມຄວາມວ່າ ພິກຂຸເພິ່ງເປັນຜູ້ມີຊານ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ

ຄຳວ່າ ຄວາມຄະນອງ ໃນຄຳວ່າ ເພິ່ງເວັ້ນຈາກຄວາມຄະນອງ ບໍ່ເພິ່ງຜະໝາດ ອະທິບາຍວ່າ ຄວາມຄະນອງມີ ຊື່ວ່າຄວາມຄະນອງ ຄວາມຄະນອງຕີນ ຊື່ວ່າຄວາມຄະນອງ ຄວາມຄະນອງມືແລະຕີນ ກໍຊື່ວ່າຄວາມຄະນອງ ຄວາມສຳຄັນໃນສິ່ງທີ່ຄວນວ່າບໍ່ຄວນ ຄວາມສຳຄັນໃນສິ່ງທີ່ບໍ່ຄວນວ່າຄວນ ຄວາມສຳຄັນໃນສິ່ງທີ່ບໍ່ມີໂທດວ່າມີໂທດ ຄວາມສຳຄັນໃນສິ່ງທີ່ມີໂທດວ່າບໍ່ມີໂທດ ຄວາມຄະນອງ ກິຣິຍາທີ່ຄະນອງ ພາວະທີ່ຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຄະນອງ

ອີກໄນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຫດ ໔ ຢ່າງ ຄື (໑) ຍ້ອນເຮັດ (໔) ຍ້ອນບໍ່ເຮັດຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຮັດ ແລະຍ້ອນບໍ່ເຮັດ ເປັນແນວໃດ?

ຄື ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ "ເຮົາເຮັດແຕ່ກາຍທຸດຈະຣິດ ບໍ່ເຮັດກາຍສຸດຈະຣິດ ຯລຯ ເຮົາເຮັດແຕ່ວະຈີທຸດຈະຣິດ ບໍ່ເຮັດວະຈີສຸດຈະຣິດ ຯລຯ ເຮົາເຮັດແຕ່ມະໂນທຸດຈະຣິດ ບໍ່ເຮັດມະໂນສຸດຈະຣິດ ຯລຯ ເຮົາເຮັດແຕ່ປານາຕິບາດ ບໍ່ເຮັດຄວາມງົດເວັ້ນຈາກປານາຕິບາດ ຯລຯ ເຮົາເຮັດແຕ່ອະທິນນາທານ ບໍ່ເຮັດຄວາມງົດເວັ້ນຈາກອະທິນນາທານ ຯລຯ ເຮົາເຮັດແຕ່ກາເມສຸມິດສາຈານ ບໍ່ເຮັດຄວາມງົດເວັ້ນຈາກກາເມສຸມິດສາຈານ ຯລຯ ເຮົາເຮັດແຕ່ມຸສາວາດ ບໍ່ເຮັດຄວາມງົດເວັ້ນຈາກມຸສາວາດ ຯລຯ ເຮົາເຮັດແຕ່ປິສຸນາວາຈາ ບໍ່ເຮັດຄວາມງົດເວັ້ນຈາກປິສຸນາວາຈາ ຯລຯ ເຮົາເຮັດແຕ່ຜະຣຸສະວາຈາ ບໍ່ເຮັດຄວາມງົດເວັ້ນຈາກຜະຣຸສະວາຈາ ຯລຯ ເຮົາເຮັດແຕ່ສຳຜັບປະລາປະ ບໍ່ເຮັດຄວາມງົດເວັ້ນຈາກສຳຜັບປະລາປະ ຯລຯ ເຮົາເຮັດແຕ່ອະພິດຊາ ບໍ່ເຮັດອະນະພິດຊາ ຯລຯ ເຮົາເຮັດແຕ່ພະຍາບາດບໍ່ເຮັດອັບພະຍາບາດ ຯລຯ ເຮົາເຮັດແຕ່ມິດສາທິດຖິ ບໍ່ເຮັດສຳມາທິດຖິ" ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຮັດແລະຍ້ອນບໍ່ເຮັດ ເປັນແນວນີ້

ອີກໄນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ "ເຮົາບໍ່ໄດ້ຮັກສາສິນໃຫ້ບໍລິບູນ ຯລຯ ບໍ່ສັງລວມໃນອິນຊີທັງ ໖ ຯລຯ ບໍ່ຮູ້ຈັກປະມານໃນການບໍຣິໂພກອາຫານ ຯລຯ ບໍ່ປະກອບຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ຯລຯ ບໍ່ໝັ່ນປະກອບສະຕິສຳປະຊັນຍະ ຯລຯ ບໍ່ຈະເລີນສະຕິປັດຖານ ໔ ຯລຯ ບໍ່ຈະເລີນສຳມັບປະທານ ໔ ຯລຯ ບໍ່ຈະເລີນອິດທິບາດ ໔ ຯລຯ ບໍ່ຈະເລີນອິນຊີ ໕ ຯລຯ ບໍ່ຈະເລີນພະລະ ໕ ຯລຯ ບໍ່ຈະເລີນໂພດຊົງ ໗ ຯລຯ ບໍ່ຈະເລີນອະຣິຍະມັກມີອົງ ໘ ຯລຯ ບໍ່ກຳນົດຮູ້ທຸກ ຯລຯ ບໍ່ລະສະມຸໄທ ຯລຯ ບໍ່ຈະເລີນມັກ" ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ "ເຮົາບໍ່ເຮັດນິໂຣດໃຫ້ປະຈັກແຈ້ງ"

ຄຳວ່າ ເພິ່ງເວັ້ນຈາກຄວາມຄະນອງ ອະທິບາຍວ່າ ເພິ່ງງົດເວັ້ນ ເວັ້ນຂາດຈາກຄວາມຄະນອງ ຄື ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຄະນອງ ໄດ້ແກ່ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມຄະນອງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ເພິ່ງເວັ້ນຈາກຄວາມຄະນອງ

## ວ່າດ້ວຍຄວາມບໍ່ຜະໝາດ

ຄຳວ່າ ບໍ່ເພິ່ງຜະໝາດ ອະທິບາຍວ່າ ເພິ່ງເປັນຜູ້ເຮັດໂດຍເອື້ອເຟື້ອ ເຮັດຕິດຕໍ່ ເຮັດບໍ່ຢຸດ ປະພຶດບໍ່ທໍ້ຖອຍ ບໍ່ລະຄວາມພໍໃຈ ບໍ່ຖືເບົາ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ຄື ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມມີເຫື່ອແຮງ ຄວາມບໍ່

ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ “ເຮົາເພິ່ງເຮັດສີນຂັນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາສີນຂັນທີ່ບໍລິບູນໃນຂໍ້ນັ້ນ ໆ ໂດຍອຸບາຍແນວໃດ” ດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ຯລຯ ວ່າ “ເຮົາເພິ່ງເຮັດສະມາທິຂັນ ຯລຯ ປັນຍາຂັນ ຯລຯ ວິມຸດຕິຂັນ ຯລຯ ວິມຸດຕິຍານະທັດສະນະຂັນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນ ໂດຍອຸບາຍແນວໃດ” ຯລຯ ຄື ຄວາມພໍໃຈຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມມີເຫື່ອແຮງ ຄວາມບໍ່ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈຄວາມປະກອບເນືອງ ໆ ດ້ວຍຄິດວ່າ “ເຮົາເພິ່ງກຳນົດຮູ້ທຸກທີ່ຍັງບໍ່ໄດ້ກຳນົດຮູ້ ເພິ່ງລະກິເລດທີ່ຍັງບໍ່ໄດ້ລະ ເພິ່ງຈະເລີນມັກທີ່ຍັງບໍ່ໄດ້ຈະເລີນ ຫຼື ເພິ່ງເຮັດໃຫ້ແຈ້ງນິໂຣດທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໂດຍອຸບາຍແນວໃດ” ດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ລວມຄວາມວ່າ ເພິ່ງເວັ້ນຈາກຄວາມຄະນອງ ບໍ່ເພິ່ງຜະໝາດ

ຄຳວ່າ ແລະ ໃນຄຳວ່າ ແລະ ຯລຯ ເພິ່ງຢູ່ໃນບ່ອນນັ່ງ ບ່ອນນອນທີ່ມີສຽງໜ້ອຍ ເປັນຄຳເຊື່ອມບົດ ຯລຯ ທີ່ເປັນບ່ອນນັ່ງຂອງພິກຂຸ ຕັດຮຽກວ່າ ບ່ອນນັ່ງ ໄດ້ແກ່ ຕຽງ ຕັ່ງ ເບາະເສື່ອແຜ່ນໜັງ ເຄື່ອງປູລາດເຮັດດ້ວຍຫຍ້າ ເຄື່ອງປູລາດເຮັດດ້ວຍໃບໄມ້ ເຄື່ອງປູລາດເຮັດດ້ວຍເຟືອງເສນາສະນະ ຕັດຮຽກວ່າ ບ່ອນນອນ ໄດ້ແກ່ ວິຫານ ເຮືອນຫຼັງຄາດ້ານດຽວ ຜາສາດເຮືອນໂລ້ນ ຖ້ຳ ລວມຄວາມວ່າ ໃນບ່ອນນັ່ງ ບ່ອນນອນ

ຄຳວ່າ ພິກຂຸ ຯລຯ ເພິ່ງຢູ່ ຯລຯ ທີ່ມີສຽງໜ້ອຍ ອະທິບາຍວ່າ ພິກຂຸເພິ່ງທ່ຽວໄປ ເພິ່ງຢູ່ ຄືເຄື່ອນໄຫວ ເປັນໄປ ຮັກສາຊີວິດ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປໃນເສນາສະນະທີ່ມີສຽງໜ້ອຍ ຄື ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼົບຫຼີກ ລວມຄວາມວ່າ ພິກຂຸ ຯລຯ ແລະເພິ່ງຢູ່ໃນບ່ອນນັ່ງ ບ່ອນນອນທີ່ມີສຽງໜ້ອຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸເພິ່ງເປັນຜູ້ມີຊານ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ
ເພິ່ງເວັ້ນຈາກຄວາມຄະນອງ ບໍ່ເພິ່ງຜະໝາດ
ແລະເພິ່ງຢູ່ໃນບ່ອນນັ່ງບ່ອນນອນທີ່ມີສຽງໜ້ອຍ

[໑໙໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງຫຼັບຫຼາຍ ມີຄວາມພຽນເຄື່ອງເຜົາກິເລດ
ເພິ່ງປະກອບຄວາມພຽນເຄື່ອງຕື່ນຢູ່
ເພິ່ງລະເວັ້ນຄວາມຂີ້ຄ້ານ ຄວາມຫຼອກລວງ ເລື້ອງພາໃຫ້ຫົວ
ການຫຼິ້ນ ເມຖຸນທຳ ພ້ອມທັງການປະດັບຕົບແຕ່ງ

## ວ່າດ້ວຍເລື້ອງການແບ່ງເວລາ

ຄຳວ່າ ພິກຂຸບໍ່ເພິ່ງຫຼັບຫຼາຍ ອະທິບາຍວ່າ ເພິ່ງແບ່ງກາງຄືນແລະກາງເວັນອອກເປັນ ໖ ສ່ວນ ຕື່ນສາ ໕ ສ່ວນ ນອນຫຼັບສາ ໑ ສ່ວນ ລວມຄວາມວ່າ ພິກຂຸບໍ່ເພິ່ງຫຼັບຫຼາຍ

ຄຳວ່າ ມີຄວາມພຽນເຄື່ອງເຜົາກິເລດ ເພິ່ງປະກອບຄວາມພຽນເຄື່ອງຕື່ນຢູ່ອະທິບາຍວ່າ ພິກຂຸໃນທຳວິໄນນີ້ ເພິ່ງຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມແລະການນັ່ງຕະຫຼອດວັນ ຄື ຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນ ດ້ວຍການຈົງກົມແລະການນັ່ງຕະຫຼອດປະຖົມຍາມແຫ່ງຣາຕີ ສຳເລັດການນອນຢ່າງຣາດຊະສີ (ສີຫະໄສ ຍາດ) ໂດຍຕະແຄງດ້ານຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ກຳນົດເວລາຕື່ນໄວ້ໃນໃຈ ຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນແລ້ວຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມແລະການນັ່ງຕະຫຼອດປັດສິມຍາມແຫ່ງຣາຕີ

ຄຳວ່າ ເພິ່ງປະກອບຄວາມພຽນເຄື່ອງຕື່ນຢູ່ໄດ້ແກ່ ເພິ່ງປະກອບ ຄື ປະກອບດ້ວຍດີເສບ ເສບເປັນນິດ ຊ່ອງເສບ ເສບສະເພາະຄວາມພຽນເຄື່ອງຕື່ນຢູ່ ລວມຄວາມວ່າ ເພິ່ງປະກອບຄວາມພຽນເຄື່ອງຕື່ນຢູ່

ຄຳວ່າ ມີຄວາມພຽນເຄື່ອງເຜົາກິເລດ ອະທິບາຍວ່າ ຄວາມພຽນ ຕັດຮຽກວ່າ ຄວາມພຽນເຄື່ອງເຜົາກິເລດ ຄື ການຜາຣົບຄວາມພຽນ ການກ້າວອອກ ການກ້າວໄປຂ້າງໜ້າ ການກ້າວຂຶ້ນໄປ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມໝັ້ນຄົງ ຄວາມຊົງໄວ້ ຄວາມສູ້ຊົນບໍ່ທຍໍ້ທຍ່ອນ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມປະຄອງທຸຣະໄວ້ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ອັນເປັນໄປທາງໃຈ ພິກຂຸຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍຄວາມພຽນເຄື່ອງເຜົາກິເລດ ນີ້ຕັດຮຽກວ່າ ຜູ້ມີຄວາມພຽນເຄື່ອງເຜົາກິເລດ ລວມຄວາມວ່າ ມີຄວາມພຽນເຄື່ອງເຜົາກິເລດ ເພິ່ງປະກອບຄວາມພຽນເຄື່ອງຕື່ນຢູ່

## ວ່າດ້ວຍຄວາມຂີ້ຄ້ານ

ຄຳວ່າ ຄວາມຂີ້ຄ້ານ ໃນຄຳວ່າ ເພິ່ງລະເວັ້ນຄວາມຂີ້ຄ້ານ ຄວາມຫຼອກລວງ ເລື້ອງຊວນຫົວ ການຫຼິ້ນ ເມຖຸນທຳ ພ້ອມທັງການປະດັບຕົບແຕ່ງ ໄດ້ແກ່ຄວາມຂີ້ຄ້ານ ກິຣິຍາທີ່ຂີ້ຄ້ານ ພາວະທີ່ຂີ້ຄ້ານ ຄວາມເປັນຜູ້ມີໃຈຂີ້ຄ້ານ ຄວາມຂີ້ຄ້ານ ກິຣິຍາທີ່ຂີ້ຄ້ານ ພາວະທີ່ຂີ້ຄ້ານ ນີ້ຕັດຮຽກວ່າ ຄວາມຂີ້ຄ້ານ

ຄຳວ່າ ຄວາມຫຼອກລວງ ອະທິບາຍວ່າ ຄວາມປະພຶດຫຼອກລວງ ຕັດຮຽກວ່າ ຄວາມຫຼອກລວງ ຄົນບາງຄົນໃນໂລກນີ້ ປະພຶດທຸດຈະຣິດດ້ວຍກາຍ ວາຈາ ໃຈ ແລ້ວຕັ້ງຄວາມປາຖະ

ໜາຊົ່ວຊາມ ຍ້ອນການປົກປິດທຸດຈະຣິດນັ້ນເປັນເຫດ ຄື ປາຖະໜາວ່າ "ຜູ້ອື່ນຢ່າໄດ້ຮູ້ທັນເຮົາເລີຍ" ດຳຣິວ່າ "ໃຜຢ່າຮູ້ທັນເຮົາເລີຍ" ກ່າວວາຈາດ້ວຍຄິດວ່າ "ໃຜຢ່າຮູ້ທັນເຮົາເລີຍ" ພະຍາຍາມທາງກາຍດ້ວຍຄິດວ່າ "ໃຜຢ່າຮູ້ທັນເຮົາເລີຍ" ຄວາມຫຼອກລວງ ຄວາມເປັນຜູ້ມີຄວາມຫຼອກລວງ ຄວາມທຳທ່າ ຄວາມລວງ ຄວາມລໍ້ລວງ ການປິດບັງ ການຫຼົບລ່ຽງ ການຫຼີກລ່ຽງ ການເຊື່ອງ ການຊຸກເຊື່ອງ ການປິດ ການປົກປິດ ການບໍ່ເປີດເຜີຍ ການບໍ່ເຮັດໃຫ້ແຈ່ມແຈ້ງ ການປິດສະນິດ ການເຮັດ ຄວາມຊົ່ວເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຫຼອກລວງ

ຄຳວ່າ ເລື້ອງຊວນຫົວ ອະທິບາຍວ່າ ບຸກຄົນບາງຄົນໃນໂລກນີ້ ຫົວເກີນປະມານ ຫົວຈົນເຫັນແຂ້ວ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ໃນວິໄນຂອງພຣະອະຣິຍະ ການຫົວເກີນປະມານ ຫົວຈົນເຫັນແຂ້ວ ນີ້ເປັນກິຣິຍາຂອງເດັກນ້ອຍ"

## ວ່າດ້ວຍການຫຼິ້ນ ໒ ຢ່າງ

ຄຳວ່າ ການຫຼິ້ນ ໄດ້ແກ່ ການຫຼິ້ນ ໒ ຢ່າງ ຄື

໑. ການຫຼິ້ນທາງກາຍ
໒. ການຫຼິ້ນທາງວາຈາ

ການຫຼິ້ນທາງກາຍ ເປັນແນວໃດ?

ຄື ຄົນຍ່ອມຫຼິ້ນກິລາບັງຄັບຊ້າງແດ່ ຫຼິ້ນກິລາບັງຄັບມ້າແດ່ ຫຼິ້ນລົດ ຫຼິ້ນທະນູ ຫຼິ້ນໝາກຣຸກແຖວລະ ໘ ຕາ ຫຼື ຫຼິ້ນໝາກແຖວລະ ໑໐ ຕາ ຫຼິ້ນໝາກເກັບ ຫຼິ້ນດວດ ຫຼິ້ນໝາກໄຫວ ຫຼິ້ນໂຍນບ້ວງ ຫຼິ້ນໄມ້ທີ່ງ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ຫຼິ້ນສະກາ ຫຼິ້ນເປົ່າໃບໄມ້ ຫຼິ້ນໄຖນ້ອຍ ໆ ຫຼິ້ນປັ້ນຫຼັງກາ ຫຼິ້ນໝາກປິ່ນ ຫຼິ້ນຕວງຊາຍ ຫຼິ້ນລົດນ້ອຍ ໆ ຫຼິ້ນທະນູນ້ອຍ ໆ ຫຼິ້ນຂຽນຊາຍ ຫຼິ້ນທາຍໃຈ ຫຼິ້ນລໍ້ລຽນຄົນພິການ ນີ້ຊື່ວ່າ ການຫຼິ້ນທາງກາຍ

ການຫຼິ້ນທາງວາຈາ ເປັນແນວໃດ?

ຄື ການເຮັດສຽງກອງດ້ວຍປາກ ເຮັດສຽງພິນພາດ ດ້ວຍປາກ ຫຼິ້ນຮົວກອງດ້ວຍປາກ ຜິວປາກ ກະເດາະປາກ ເປົ່າປາກ ຊ້ອມເພງ ໂຫ່ຮ້ອງ ຂັບຮ້ອງ ຫຼິ້ນຕະລົກ ນີ້ຊື່ວ່າການຫຼິ້ນທາງວາຈາ ເປັນທຳນຽມຂອງອະສັດຕະບຸຣຸດ ຄື ທຳນຽມຂອງຊາວບ້ານ ທຳນຽມຊັ້ນຕໍ່າ ທຳນຽມທີ່ຊົ່ວຊາມ ທຳນຽມທີ່ມີນໍ້າເປັນທີ່ສຸດ ທຳນຽມທີ່ປະຕິບັດກັນໃນບ່ອນລັບ ທຳນຽມທີ່ຕ້ອງປະຕິບັດກັນເປັນຄູ່ ໆ ຊື່ວ່າເມຖຸນທຳ ຍ້ອນເຫດໃດ ຈຶ່ງຕັດຮຽກວ່າ ເມຖຸນທຳ ຍ້ອນທຳນັ້ນເປັນທຳນຽມຂອງຄົນຄູ່ ຜູ້ກຳໜັດ ກຳໜັດແຮງກ້າ ປຽກຊຸ່ມ ກັດກຸ້ມດ້ວຍຣາຄະ ຖືກຣາຄະຄອບງຳຈິດສະເໝີກັນທັງ ໒ ຄົນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ ຄົນ ໒ ຄົນກໍ່ການຜິດຖຽງກັນ ຯລຯ ຄົນ ໒ ຄົນກໍ່ການໝາງໃຈກັນ ຯລຯ ຄົນ ໒ ຄົນກໍ່ເລື້ອງອີ້ສາວກັນ ຯລຯ ຄົນ ໒ ຄົນກໍ່ການ

ວິວາດກັນ ໗ລ໗ ຄົນ ໔ ຄົນກໍ່ອະທິກອນກັນ ໗ລ໗ ຄົນ ໔ ຄົນສົນທະນາກັນ ໗ລ໗ ຄົນ ໔ ຄົນ ເຈຣະຈາກັນ ຮຽກວ່າ ຄູ່ເຈຣະຈາ ສັນໃດ ທຳນັ້ນເປັນທຳນຽມຂອງຄົນຄູ່ ຜູ້ກຳໜັດ ກຳໜັດແຮງກ້າ ປຽກຊຸ່ມ ກັດກຸ້ມດ້ວຍຣາຄະ ຖືກຣາຄະຄອບງຳຈິດສະເໝີກັນທັງ ໔ ຄົນ ສັນນັ້ນຄືກັນ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ເມຖຸນທຳ

ວ່າດ້ວຍການປະດັບຕົບແຕ່ງ ໔ ຢ່າງ

ຄຳວ່າ ການປະດັບຕົບແຕ່ງ ໄດ້ແກ່ ການປະດັບຕົບແຕ່ງ ໔ ຢ່າງ ຄື

໑. ການປະດັບຕົບແຕ່ງຂອງຄະລຶຫັດ

໔. ການປະດັບຕົບແຕ່ງຂອງບັນພະຊິດ

ການປະດັບຕົບແຕ່ງຂອງຄະລຶຫັດ ເປັນແນວໃດ?

ຄື ການແຕ່ງຜົມ, ການແຕ່ງໜວດ ການທັດດອກໄມ້ ການປະພົມເຄື່ອງຫອມ ການຍ້ອມຜິວ ການໃຊ້ເຄື່ອງປະດັບ ການໃຊ້ເຄື່ອງແຕ່ງຕົວ ການນຸ່ງຜ້າສວຍງາມ ການປະດັບຂໍ້ມື ການໂພກຜ້າໂພກຫົວ ການອົບຕົວ ການນວດຕົວ ການອາບນ້ຳ ການດັດຕົວ ການແຍງແວ່ນ ການທາເປືອກຕາ ການສວມພວງດອກໄມ້ ການທາປາກ ການເຈີມໜ້າ ການຜູກຂໍ້ມື ການເກົ້າຜົມ ການໃຊ້ໄມ້ເທົ້າ ການໃຊ້ທະນານ ການໃຊ້ພຣະຂັນ ການໃຊ້ຄັນຮົ່ມ ການສຸບເກີບສວຍງາມ ການຕິດຂອບໜ້າ ການປັກປິ່ນ ການໃຊ້ພັດ ການນຸ່ງຜ້າຂາວ ການນຸ່ງຜ້າຊາຍຍາວ ນີ້ຊື່ວ່າ ການປະດັບຕົບແຕ່ງຂອງຄະລຶຫັດ

ການປະດັບຕົບແຕ່ງຂອງບັນພະຊິດ ເປັນແນວໃດ?

ຄື ການຕົບແຕ່ງຈີວອນ ການຕົບແຕ່ງບາດ ການຕົບແຕ່ງເສນາສະນະ ການຕົບແຕ່ງ ການປະດັບປະດາ ການຫຼິ້ນສະນຸກໃນການປະດັບ ຄວາມເພີດເພີນໃນການປະດັບ ຄວາມປາຖະໜາການປະດັບ ຄວາມເປັນຜູ້ປາຖະໜາການປະດັບ ກິຣິຍາທີ່ປະດັບ ຄວາມເປັນກິຣິຍາທີ່ປະດັບ ຮ່າງກາຍອັນເນົ່າເປື່ອຍນີ້ ຫຼື ບໍຣິຂານອັນເປັນພາຍນອກ ນີ້ຊື່ວ່າ ການປະດັບຕົບແຕ່ງຂອງບັນພະຊິດ

ຄຳວ່າ ເພິ່ງລະເວັ້ນຄວາມຂີ້ຄ້ານ ຄວາມຫຼອກລວງ ເລື້ອງຊວນຫົວ ການຫຼິ້ນເມຖຸນທຳ ພ້ອມທັງການປະດັບຕົບແຕ່ງ ອະທິບາຍວ່າ ເພິ່ງລະເວັ້ນ ຄື ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຂີ້ຄ້ານ ຄວາມຫຼອກລວງ ເລື້ອງຊວນຫົວການຫຼິ້ນ ແລະເມຖຸນທຳ ພ້ອມທັງການປະດັບຕົບແຕ່ງ ຄື ພ້ອມທັງບໍລິວານ ພ້ອມທັງບໍຣິພັນ ພ້ອມທັງບໍຣິຂານ ລວມຄວາມວ່າ ເພິ່ງລະເວັ້ນຄວາມຂີ້ຄ້ານ ຄວາມຫຼອກລວງ ເລື້ອງຊວນຫົວ ການຫຼິ້ນ ເມຖຸນທຳ ພ້ອມທັງການປະດັບຕົບແຕ່ງດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງຫຼັບຫຼາຍ ມີຄວາມພຽນເຄື່ອງເຜົາກິເລດ
ເພິ່ງປະກອບຄວາມພຽນເຄື່ອງຕື່ນຢູ່
ເພິ່ງລະເວັ້ນຄວາມຂີ້ຄ້ານ ຄວາມຫຼອກລວງ ເລື້ອງຊວນຫົວ
ການຫຼິ້ນ ເມຖຸນທຳ ພ້ອມທັງການປະດັບຕົບແຕ່ງ

[໑໙໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຜູ້ນັບຖືພຣະຣັດຕະນະໄຕຣ ບໍ່ເພິ່ງປະກອບການເຮັດອາຖັນ
ການທຳນາຍຝັນ ການທຳນາຍລັກສະນະ ຫຼື ແມ່ນການເບິ່ງເລີກຍາມ
ບໍ່ເພິ່ງຮຽນການທຳນາຍສຽງສັດຮ້ອງ
ການປຸງຢາໃຫ້ຖືພາ ແລະການບຳບັດຮັກສາໂຣກ

## ວ່າດ້ວຍການເຮັດອາຖັນ

ຄຳວ່າ ບໍ່ເພິ່ງປະກອບການເຮັດອາຖັນ ການທຳນາຍຝັນ ການທຳນາຍລັກສະນະ ຫຼື ແມ່ນການເບິ່ງເລີກຍາມ ອະທິບາຍວ່າ ນັກເຮັດອາຖັນຍ່ອມພາກັນປະກອບອາຖັນ ເມື່ອນຄອນຖືກລ້ອມ ຫຼື ເມື່ອສົງຄາມຕັ້ງປະຊິດກັນ ກໍເຮັດໃຫ້ສະໜຽດຈັງໄຣເກີດຂຶ້ນ ເຮັດໃຫ້ອັນຕະລາຍເກີດຂຶ້ນ ເຮັດໃຫ້ໂຣກເກີດຂຶ້ນ ເຮັດໃຫ້ມີອາການຈຸກສຽດ ເຮັດໃຫ້ມີອາການລົງຮາກ ເຮັດໃຫ້ມີອາການເຊື່ອງຊຶມ ເຮັດໃຫ້ເກີດໂຣກບິດໃນໝູ່ຄົນທີ່ເປັນຂ້າເສິກ ເປັນສັດຕູກັນ ນັກເຮັດອາຖັນພາກັນປະກອບອາຖັນແນວນີ້

## ວ່າດ້ວຍການທຳນາຍຝັນ

ພວກນັກທຳນາຍຝັນ ຍ່ອມທຳນາຍຝັນວ່າ “ຄົນຝັນເວລາເຊົ້າຈະມີຜົນແນວນີ້ ຄົນຝັນເວລາທ່ຽງຈະມີຜົນແນວນີ້ ຄົນຝັນເວລາແລງຈະມີຜົນແນວນີ້ ຄົນຝັນເວລາປະຖົມຍາມ ຯລຯ ຝັນເວລາມັດຊິມະຍາມ ຯລຯ ຝັນເວລາປັດສິມມະຍາມ ຯລຯ ຄົນນອນຕະແຄງຂວາຝັນ ຯລຯ ຄົນນອນຕະແຄງຊ້າຍຝັນ ຯລຯ ຄົນນອນຫງາຍຝັນ ຯລຯ ຄົນນອນຄວ່ຳຝັນ ຯລຯ ຄົນຝັນເຫັນດວງຈັນ ຯລຯ ຄົນຝັນເຫັນດວງອາທິດ ຯລຯ ຄົນຝັນເຫັນມະຫາສະມຸດ ຯລຯ ຄົນຝັນເຫັນຂຸນເຂົາສິເນຣຸ ຯລຯ ຄົນຝັນເຫັນຊ້າງ ຯລຯຄົນຝັນເຫັນມ້າ ຯລຯ ຄົນຝັນເຫັນລົດ ຯລຯ ຄົນຝັນເຫັນພົນຍ່າງ ຯລຯ ຄົນຝັນເຫັນກະບວນທັບ ຯລຯຄົນຝັນເຫັນສວນທີ່ໜ້າອອນຊອນ ຯລຯ ຄົນຝັນເຫັນປ່າທີ່ໜ້າອອນຊອນ ຯລຯ ຄົນຝັນເຫັນພື້ນທີ່ທີ່ໜ້າອອນຊອນ ຯລຯຄົນຝັນເຫັນສະນ້ຳທີ່ໜ້າອອນຊອນ ຈະມີຜົນແນວນີ້” ພວກນັກທຳນາຍຝັນຍ່ອມທຳນາຍຝັນແນວນີ້

## ວ່າດ້ວຍການທຳນາຍລັກສະນະ

ພວກນັກທຳນາຍລັກສະນະ ຍ່ອມທຳນາຍລັກສະນະ ຄື ລັກສະນະແກ້ວມະນີ ລັກສະນະໄມ້ພອງ ລັກສະນະຜ້າ ລັກສະນະດາບ ລັກສະນະສອນ ລັກສະນະທະນູ ລັກສະນະອາວຸດ ລັກສະນະສະຕີ ລັກສະນະບຸຣຸດ ລັກສະນະເດັກຍິງ ລັກສະນະເດັກຊາຍ ລັກສະນະທາດຍິງ ລັກສະນະທາດຊາຍ ລັກສະນະຊ້າງ ລັກສະນະມ້າ ລັກສະນະກະບື ລັກສະນະງົວ ອຸສະພະ ລັກສະນະງົວ ສາມັນລັກສະນະແບ້ ລັກສະນະແກະ ລັກສະນະໄກ່ ລັກສະນະນົກກະທາ ລັກສະນະເຫ້ຍ ລັກສະນະຕຸ້ມຫູ ລັກສະນະເຕົ່າ ລັກສະນະມະຣິຄະ ພວກນັກທຳນາຍລັກສະນະຍ່ອມທຳນາຍລັກສະນະແນວນີ້

## ວ່າດ້ວຍການເບິ່ງເລີກຍາມ

ພວກນັກທຳນາຍເລີກຍາມ ຍ່ອມທຳນາຍເລີກຍາມວ່າ ເລີກມີ ໘໗ ເລີກ ຄວນເຮັດງານມຸງຄຸນຂຶ້ນບ້ານໃໝ່ໂດຍເລີກນີ້ ຄວນເຮັດວຽກມຸງຄຸນຜູກເຄື່ອງປະດັບໂດຍເລີກນີ້ ຄວນເຮັດວຽກມຸງຄຸນແຕ່ງງານໂດຍເລີກນີ້ ຄວນເຮັດວຽກມຸງຄຸນປູກພືດໂດຍເລີກນີ້ ຄວນເຮັດວຽກມຸງຄຸນຄອງເຮືອນໂດຍເລີກນີ້ ພວກນັກທຳນາຍເລີກຍາມ ຍ່ອມທຳນາຍເລີກຍາມແນວນີ້

ຄຳວ່າ ບໍ່ເພິ່ງປະກອບການເຮັດອາຖັນ ການທຳນາຍຝັນ ການທຳນາຍລັກສະນະ ຫຼື ແມ່ນການເບິ່ງເລີກຍາມ ອະທິບາຍວ່າ ບໍ່ເພິ່ງປະກອບ ຄື ບໍ່ເພິ່ງປະພຶດ ບໍ່ເພິ່ງປະພຶດໂດຍເອື້ອເຟື້ອ ບໍ່ເພິ່ງສະມາທານປະພຶດ ການເຮັດອາຖັນ ການທຳນາຍຝັນ ການທຳນາຍລັກສະນະ ຫຼື ແມ່ນການເບິ່ງເລີກຍາມ

ອີກໄນໜຶ່ງ ບໍ່ຄວນຮຽນ ບໍ່ຄວນທ່ອງ ບໍ່ຄວນຊົງຈຳ ບໍ່ຄວນເຂົ້າໄປຊົງຈຳ ບໍ່ຄວນເຂົ້າໄປກຳນົດ ບໍ່ຄວນປະກອບການເຮັດອາຖັນ ເປັນຕົ້ນ ລວມຄວາມວ່າ ບໍ່ເພິ່ງປະກອບການເຮັດອາຖັນ ການທຳນາຍຝັນ ການທຳນາຍລັກສະນະ ຫຼື ແມ່ນການເບິ່ງເລີກຍາມ

ຄຳວ່າ ຜູ້ນັບຖືພຣະຣັດຕະນະໄຕຣ ໗ລ໗ ບໍ່ເພິ່ງຮຽນການທຳນາຍສຽງສັດຮ້ອງ ການປຸງຢາໃຫ້ຖືພາ ແລະການບຳບັດຮັກສາໂຣກ ອະທິບາຍວ່າ ສຽງເນື້ອມະຣິຄະ ແລະສຽງນົກຮ້ອງ ຕັດຮຽກວ່າ ສຽງສັດຮ້ອງ ພວກນັກທຳນາຍສຽງເນື້ອ ແລະສຽງນົກຮ້ອງຍ່ອມທຳນາຍສຽງເນື້ອແລະສຽງນົກຮ້ອງ ຄື ຮູ້ຈັກສຽງຮ້ອງ ສຽງເຈຣະຈາກັນຂອງພວກນົກ ຫຼື ພວກສັດ ໔ ຕີນ ພວກນັກທຳນາຍສຽງເນື້ອແລະສຽງນົກຮ້ອງຍ່ອມທຳນາຍສຽງເນື້ອແລະສຽງນົກຮ້ອງແນວນີ້ ພວກຄົນປຸງຢາໃຫ້ຖືພາໄດ້ ກໍເຮັດໃຫ້ຖືພາຂຶ້ນ ການຖືພາຍ່ອມຕັ້ງຢູ່ບໍ່ໄດ້ ຍ້ອນເຫດ ໒ ຢ່າງ ຄື (໑) ຍ້ອນເຊື້ອໂຣກ (໒) ຍ້ອນລົມກຳເຣີບ ພວກຄົນປຸງຢາໃຫ້ຖືພາຍ່ອມໃຫ້ຢາເພື່ອກຳຈັດເຊື້ອໂຣກ

ຫຼື ບຳບັດລົມກຳເຣີບ ພວກຄົນປຸງຢາໃຫ້ຖືພາໄດ້ ກໍເຮັດໃຫ້ຖືພາຂຶ້ນແນວນີ້ວ່າ ດ້ວຍການບຳບັດຮັກສາໂຣກ

ຄຳວ່າ ການບຳບັດຮັກສາໂຣກ ໄດ້ແກ່ ການບຳບັດຮັກສາໂຣກ ໕ ຢ່າງ ຄື

໑. ການຮັກສາດ້ວຍການເສກເປົ່າ
໒. ການຮັກສາດ້ວຍການປາດ
໓. ການຮັກສາທາງຢາ
໔. ການຮັກສາທາງພູດຜີ
໕. ການຮັກສາໂຣກເດັກ (ກຸມາຣະເວດ)

ຄຳວ່າ ຜູ້ນັບຖືພຣະຣັດຕະນະໄຕຣ ໄດ້ແກ່ ຜູ້ນັບຖືພຣະພຸດທະເຈົ້າ ພຣະທຳ ພຣະສົງ ຜູ້ນັ້ນນັບຖືພຣະຜູ້ມີພຣະພາກເຈົ້າວ່າຂອງເຮົາ ພຣະຜູ້ມີພຣະພາກເຈົ້າກໍຊົງຮັບຮອງບຸກຄົນນັ້ນ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດເປັນຜູ້ຄົດໂກງ ແຂງກະດ້າງ ເວົ້າພ່ອຍ ວ່າງທ່າ ມີມານະຈັດ ມີຈິດບໍ່ໝັ້ນຄົງ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ບໍ່ແມ່ນຜູ້ນັບຖືເຮົາ ເປັນຜູ້ໄປຈາກທຳວິໄນນີ້ແລ້ວ ແລະພິກຂຸເຫຼົ່ານັ້ນຈະບໍ່ເຖິງ ຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້ ສ່ວນພິກຂຸເຫຼົ່າໃດ ບໍ່ຄົດໂກງ ບໍ່ເວົ້າພ່ອຍ ເປັນນັກປາດ ບໍ່ແຂງກະດ້າງ ມີຈິດໝັ້ນຄົງ ພິກຂຸເຫຼົ່ານັ້ນ ເປັນຜູ້ນັບຖືເຮົາ ເປັນຜູ້ບໍ່ໄປຈາກທຳວິໄນນີ້ ແລະ ພິກຂຸເຫຼົ່ານັ້ນຈະເຖິງຄວາມຈະເລີນ ງອກງາມ ໄພບູນໃນທຳວິໄນນີ້"

(ພຣະຜູ້ມີພຣະພາກຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງຕັດຄາຖາປະພັນຕໍ່ໄປອີກວ່າ)

ພິກຂຸທັງຫຼາຍ ຜູ້ຄົດໂກງ ແຂງກະດ້າງ
ເວົ້າພ່ອຍ ວ່າງທ່າ ມີມານະຈັດ ມີຈິດບໍ່ໝັ້ນຄົງ
ຍ່ອມບໍ່ງອກງາມໃນທຳທີ່ພຣະສຳມາສຳພຸດທະເຈົ້າສະແດງແລ້ວ
(ສ່ວນ) ພິກຂຸທັງຫຼາຍ ຜູ້ບໍ່ຄົດໂກງ ບໍ່ເວົ້າພ່ອຍ
ເປັນນັກປາດ ບໍ່ແຂງກະດ້າງ ມີຈິດໝັ້ນຄົງ
ຍ່ອມງອກງາມໃນທຳທີ່ພຣະສຳມາສຳພຸດທະເຈົ້າສະແດງແລ້ວ

ຄຳວ່າ ຜູ້ນັບຖືພຣະຣັດຕະນະໄຕຣ ຯລຯ ບໍ່ເພິ່ງຮຽນການທຳນາຍສຽງສັດຮ້ອງ ການປຸງຢາໃຫ້ຖືພາ ແລະການບຳບັດຮັກສາໂຣກ ອະທິບາຍວ່າ ຜູ້ນັບຖືພຣະຣັດຕະນະໄຕຣ ບໍ່ເພິ່ງຮຽນ ຄື ບໍ່ເພິ່ງຮ່ຳຮຽນ ບໍ່ເພິ່ງເສບພ້ອມ ບໍ່ເພິ່ງເສບສະເພາະ ບໍ່ເພິ່ງປະພຶດ ບໍ່ເພິ່ງປະພຶດເອື້ອເຟື້ອ ບໍ່ເພິ່ງສະມາທານປະພຶດການທຳນາຍສຽງສັດຮ້ອງ ການປຸງຢາໃຫ້ຖືພາ ແລະການບຳບັດຮັກສາໂຣກ

ອີກໄນໜຶ່ງ ບໍ່ຄວນຮຽນ ບໍ່ຄວນທ່ອງ ບໍ່ຄວນຊົງຈຳ ບໍ່ຄວນເຂົ້າໄປຊົງຈຳ ບໍ່ຄວນເຂົ້າໄປກຳນົດ ບໍ່ຄວນປະກອບການທຳນາຍສຽງສັດຮ້ອງເປັນຕົ້ນ ລວມຄວາມວ່າຜູ້ນັບຖືພຣະຣັດຕະນະໄຕຣ ຯລຯ ບໍ່ເພິ່ງຮຽນການທຳນາຍສຽງສັດຮ້ອງ ການປຸງຢາໃຫ້ຖືພາ ແລະການບຳບັດຮັກສາໂຣກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ຜູ້ນັບຖືພຣະຣັດຕະນະໄຕຣ ບໍ່ເພິ່ງປະກອບການເຮັດອາຖັນ
ການທຳນາຍຝັນ ການທຳນາຍລັກສະນະ ຫຼືແມ່ນການເບິ່ງເລີກຍາມ
ບໍ່ເພິ່ງຮຽນການທຳນາຍສຽງສັດຮ້ອງ
ການປຸງຢາໃຫ້ຖືພາ ແລະການບຳບັດຮັກສາໂຣກ

[໑໖໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງຫວັ່ນໄຫວຍ້ອນການນິນທາ
ໄດ້ຮັບການສັນເສີນແລ້ວກໍບໍ່ເພິ່ງລຳພອງຕົນ
ເພິ່ງບັນເທົາຄວາມໂລບພ້ອມທັງຄວາມຂີ້ຖີ່
ຄວາມໂກດແລະວາຈາສັບສໍ່

## ວ່າດ້ວຍບໍ່ຫວັ່ນໄຫວຍ້ອນນິນທາແລະສັນເສີນ

ຄຳວ່າ ບໍ່ເພິ່ງຫວັ່ນໄຫວຍ້ອນການນິນທາ ອະທິບາຍວ່າ ຄົນບາງພວກໃນໂລກນີ້ພາກັນນິນທາ ຄື ຕິຕຽນ ວ່າຮ້າຍພິກຂຸ ດ້ວຍຊາດແດ່ ດ້ວຍໂຄດແດ່ ດ້ວຍຄວາມເປັນບຸດຂອງຜູ້ມີຕະກູນແດ່ ດ້ວຍຄວາມເປັນຄົນມີຮູບງາມແດ່ ດ້ວຍຊັບແດ່ ດ້ວຍການສຶກສາແດ່ ດ້ວຍໜ້າທີ່ວຽກງານແດ່ ດ້ວຍຫຼັກແຫ່ງສິລະປະວິທະຍາແດ່ ດ້ວຍວິທະຍະຖານະແດ່ ດ້ວຍຄວາມຄົງແກ່ຮຽນແດ່ ດ້ວຍປະຕິພານແດ່ ດ້ວຍສິ່ງອື່ນນອກຈາກທີ່ກ່າວແລ້ວແດ່ ພິກຂຸຜູ້ຖືກນິນທາ ຕິຕຽນ ວ່າຮ້າຍແລ້ວ ກໍບໍ່ເພິ່ງຫວັ່ນໄຫວ ບໍ່ເພິ່ງສັ່ນເຊນ ບໍ່ເພິ່ງກະສັບກະສ່າຍ ບໍ່ເພິ່ງຫວາດສຽວ ບໍ່ເພິ່ງຄັ່ນຄ້າມ ບໍ່ເພິ່ງເກງກົວ ບໍ່ເພິ່ງຢ້ານກົວ ບໍ່ເພິ່ງເຖິງຄວາມສະດຸ້ງຢ້ານ ຄື ບໍ່ເພິ່ງຢ້ານ ບໍ່ເພິ່ງຫວາດສຽວ ບໍ່ເພິ່ງສະດຸ້ງ ບໍ່ເພິ່ງໜີໄປ ຍ້ອນການນິນທາ ຍ້ອນການຕິຕຽນ ຍ້ອນການວ່າຮ້າຍ ຍ້ອນຄວາມເສື່ອມເສຍກຽດ ຍ້ອນຖືກກ່າວໂທດ ເພິ່ງເປັນຜູ້ລະໄພແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງຫົວຢູ່ ລວມຄວາມວ່າ ບໍ່ເພິ່ງຫວັ່ນໄຫວຍ້ອນການນິນທາ

ຄຳວ່າ ພິກຂຸ ຯລຯ ໄດ້ຮັບການສັນເສີນແລ້ວກໍບໍ່ເພິ່ງລຳພອງຕົນ ອະທິບາຍວ່າ ຄົນບາງພວກໃນໂລກນີ້ພາກັນສັນເສີນ ຄື ຊົມເຊີຍ ຍ້ອງຍໍ ພັນນາຄຸນພິກຂຸ ດ້ວຍຊາດແດ່ ຯລຯ ດ້ວຍສິ່ງອື່ນນອກຈາກທີ່ກ່າວແລ້ວແດ່

ພິກຂຸໄດ້ຮັບການສັນເສີນ ຄື ຊົມເຊີຍ ຍ້ອງຍໍ ພັນນາຄຸນແລ້ວກໍບໍ່ເພິ່ງເຮັດຄວາມລຳພອງຕົນ ຄື ບໍ່ເພິ່ງເຮັດຄວາມຈອງຫອງ ບໍ່ເພິ່ງເຮັດຄວາມຖືຕົວ ບໍ່ເພິ່ງເຮັດຄວາມຫົວດື້ ບໍ່ເພິ່ງໃຫ້ເກີດຄວາມຖືຕົວ ບໍ່ເພິ່ງເປັນຄົນຈອງຫອງ ປັ້ນປຶ່ງ ຫົວສູງ ຍ້ອນການສັນເສີນ ການຊົມເຊີຍ ການຍ້ອງຍໍ ການພັນນາຄຸນນັ້ນ ລວມຄວາມວ່າ ພິກຂຸ ໗ລ໗ ໄດ້ຮັບການສັນເສີນ ແລ້ວກໍບໍ່ເພິ່ງລຳພອງຕົນ ຄຳວ່າ ຄວາມໂລບ ໃນຄຳວ່າ ເພິ່ງບັນເທົາຄວາມໂລບພ້ອມທັງຄວາມຂີ້ຖີ່

ຄວາມໂກດແລະວາຈາສັບສໍ່ ໄດ້ແກ່ ຄວາມໂລບ ກິຣິຍາທີ່ໂລບ ພາວະທີ່ໂລບ ຄວາມກຳໜັດແຮງກ້າ ກິຣິຍາທີ່ກຳໜັດແຮງກ້າ ພາວະທີ່ກຳໜັດແຮງກ້າ ອະພິດຊາ ອະກຸສົນມູນຄືໂລພະ

ຄຳວ່າ ຄວາມຂີ້ຖີ່ ໄດ້ແກ່ ມັດສະຣິຍະ ໕ ຢ່າງ ຄື (໑) ອາວາດມັດສະຣິຍະ ໗ລ໗ ຄວາມຍຶດຖື ຕັດຮຽກວ່າ ຄວາມຂີ້ຖີ່

ຄຳວ່າ ຄວາມໂກດ ໄດ້ແກ່ ໃຈປອງຮ້າຍ ມຸ້ງຮ້າຍ ຂັດເຄືອງ ຂຸ່ນເຄືອງ ເຄືອງ ເຄືອງແຮງ ເຄືອງຕະຫຼອດ ຊັງ ຊິງຊັງ ກຽດຊັງ ໃຈພະຍາບາດ ໃຈແຄ້ນເຄືອງ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມໂກດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ

ຄຳວ່າ ວາຈາສັບສໍ່ ໄດ້ແກ່ ຄົນບາງຄົນໃນໂລກນີ້ ເປັນຜູ້ມີວາຈາສັບສໍ່ ຟັງຈາກຂ້າງນີ້ແລ້ວໄປບອກຂ້າງນັ້ນເພື່ອທຳລາຍຄົນໝູ່ນີ້ ຫຼື ຟັງຈາກຂ້າງນັ້ນແລ້ວມາບອກຂ້າງນີ້ເພື່ອທຳລາຍຄົນໝູ່ນັ້ນ ດ້ວຍວິທີນີ້ ກໍເຮັດຄົນທີ່ສາມັກຄີໃຫ້ແຕກແຍກ ຫຼື ສະໜັບສະໜູນຜູ້ທີ່ແຕກແຍກກັນແລ້ວ ມັກການແບ່ງພວກແບ່ງເຫຼົ່າ ຍິນດີການແບ່ງພວກແບ່ງເຫຼົ່າ ສະນຸກກັບການແບ່ງພວກແບ່ງເຫຼົ່າ ເວົ້າແຕ່ເລື້ອງກໍ່ໃຫ້ເກີດການແບ່ງພວກແບ່ງເຫຼົ່າ ນີ້ຕັດຮຽກວ່າວາຈາສັບສໍ່

ອີກໄນໜຶ່ງ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍເຫດ ໒ ຢ່າງ ຄື (໑) ດ້ວຍປະສົງໃຫ້ຕົນເປັນທີ່ຮັກ (໒) ດ້ວຍປະສົງໃຫ້ເຂົາແຕກກັນ

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກດ້ວຍຄິດວ່າ “ເຮົາຈັກເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ຄຸ້ນເຄີຍ ເປັນທີ່ສະໜິດສະໜົມ ເປັນທີ່ດີໃຈຂອງຜູ້ນີ້” ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ຕົນເປັນທີ່ຮັກ ເປັນແນວນີ້

ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍປະສົງໃຫ້ເຂົາແຕກກັນ ເປັນແນວໃດ?

ຄື ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍຄິດວ່າ “ເຮັດແນວໃດ ຊົນເຫຼົ່ານີ້ ເພິ່ງເປັນຄົນແປກແຍກ ແຕກຕ່າງ ເປັນພັກເປັນເຫຼົ່າ ເປັນ ໒ ພວກ ເປັນ ໒ ຝັກ ໒ ຝ່າຍແຕກແຍກ ບໍ່ປອງ

ດອງກັນ ຢູ່ລຳບາກ ບໍ່ສະບາຍ" ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປ ດ້ວຍປະສົງໃຫ້ເຂົາແຕກກັນ ເປັນແນວນີ້

ຄຳວ່າ ເພິ່ງບັນເທົາຄວາມໂລບພ້ອມທັງຄວາມຂີ້ຖີ່ ຄວາມໂກດ ແລະວາຈາສໍ່ສຽດອະທິບາຍວ່າ ເພິ່ງເບົາ ເພິ່ງບັນເທົາ ຄື ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມໂລບ ຄວາມຂີ້ຖີ່ ຄວາມໂກດ ແລະວາຈາສັບສໍ່ ລວມຄວາມວ່າ ເພິ່ງບັນເທົາຄວາມໂລບພ້ອມທັງຄວາມຂີ້ຖີ່ ຄວາມໂກດແລະວາຈາສັບສໍ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງຫວັ່ນໄຫວຍ້ອນການນິນທາ
ໄດ້ຮັບການສັນເສີນແລ້ວກໍບໍ່ເພິ່ງລຳພອງຕົນ
ເພິ່ງບັນເທົາຄວາມໂລບພ້ອມທັງຄວາມຂີ້ຖີ່
ຄວາມໂກດແລະວາຈາສັບສໍ່

[໑໖໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງດຳຣົງຊີວິດໃນການຊື້ຂາຍ
ບໍ່ເພິ່ງກໍ່ກິເລດເປັນເຫດວ່າຮ້າຍໃນບ່ອນໃດ ໆ
ບໍ່ເພິ່ງກ່ຽວຂ້ອງໃນບ້ານ ແລະບໍ່ເພິ່ງເວົ້າລຽບຄຽງກັບຄົນ
ຍ້ອນຢາກໄດ້ລາບ

ຄຳວ່າ ບໍ່ເພິ່ງດຳຣົງຊີວິດໃນການຊື້ຂາຍ ອະທິບາຍວ່າ ການຊື້ຂາຍທີ່ຊົງຫ້າມໄວ້ໃນວິໄນ ບໍ່ຊົງປະສົງເອົາໃນເນື້ອຄວາມນີ້

ພິກຂຸດຳຣົງຊີວິດໃນການຊື້ຂາຍ ເປັນແນວໃດ?

ຄື ພິກຂຸເມື່ອທຳຄວາມລໍ້ລວງ ຫຼື ປາຖະໜາກຳໄລ ແລກປ່ຽນບາດ ຈີວອນ ຫຼື ບໍຣິຂານອື່ນແນວໃດແນວໜຶ່ງກັບສະຫະທຳມິກ ໑ ຈຳພວກ ພິກຂຸຊື່ວ່າ ດຳຣົງຊີວິດໃນການຊື້ຂາຍ ເປັນແນວນີ້

ພິກຂຸບໍ່ດຳຣົງຊີວິດໃນການຊື້ຂາຍ ເປັນແນວໃດ?

ຄື ພິກຂຸເມື່ອບໍ່ເຮັດຄວາມລໍ້ລວງ ຫຼື ບໍ່ປາຖະໜາກຳໄລ ບໍ່ແລກປ່ຽນບາດ ຈີວອນຫຼືບໍຣິຂານອື່ນແນວໃດແນວໜຶ່ງກັບສະຫະທຳມິກ ໕ ຈຳພວກ ພິກຂຸຊື່ວ່າບໍ່ດຳຣົງຊີວິດໃນການຊື້ຂາຍ ເປັນແນວນີ້

ຄຳວ່າ ບໍ່ເພິ່ງດຳຣົງຊີວິດໃນການຊື້ຂາຍ ອະທິບາຍວ່າ ບໍ່ເພິ່ງດຳຣົງຊີວິດ ຄື ບໍ່ເພິ່ງດຳຣົງຕົນໃນການຊື້ຂາຍ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງ

ການຊື້ຂາຍ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນບໍ່ກ່ຽວຂ້ອງກັບການຊື້ຂາຍ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງດຳຣົງຊີວິດໃນການຊື້ຂາຍ

## ວ່າດ້ວຍກິເລດ

ຄຳວ່າ ພິກຂຸ ຯລຯ ບໍ່ເພິ່ງກໍ່ກິເລດເປັນເຫດວ່າຮ້າຍໃນບ່ອນໃດ ໆ ອະທິບາຍວ່າ ກິເລດ

ເປັນເຫດກໍ່ການວ່າຮ້າຍ ເປັນແນວໃດ?

ສະມະນະພາມບາງພວກ ມີລິດ ມີທິບພະຈັກຂຸ ຮູ້ໃຈຄົນອື່ນ ສະມະນະພາມເຫຼົ່ານັ້ນເຫັນ (ຮູບ) ໄດ້ແຕ່ໄກແດ່ ຢູ່ໃກ້ກໍບໍ່ຜາກົດ (ແກ່ຜູ້ອື່ນ) ແດ່ ຮູ້ໃຈ (ຜູ້ອື່ນ) ດ້ວຍໃຈ (ຕົນ) ແດ່ ເທວະດາ ຜູ້ມີລິດ ມີທິບພະຈັກຂຸ ຮູ້ໃຈຄົນອື່ນ ເທວະດາເຫຼົ່ານັ້ນ ເຫັນ (ຮູບ) ໄດ້ແຕ່ໄກແດ່ ຢູ່ໃກ້ກໍບໍ່ຜາກົດ (ແກ່ຜູ້ອື່ນ) ແດ່ ຮູ້ໃຈ (ຜູ້ອື່ນ) ດ້ວຍໃຈ (ຕົນ) ແດ່ ຊົນທັງຫຼາຍ ເພິ່ງວ່າຮ້າຍສະມະນະພາມ ແລະເທວະດາທັງຫຼາຍນັ້ນ ດ້ວຍກິເລດຢ່າງຫຍາບແດ່ ດ້ວຍກິເລດຢ່າງກາງແດ່ ດ້ວຍກິເລດຢ່າງລະອຽດແດ່

ກິເລດຢ່າງຫຍາບ ເປັນແນວໃດ?

ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ເຫຼົ່ານີ້ຮຽກວ່າ ກິເລດຢ່າງຫຍາບ

ກິເລດຢ່າງກາງ ເປັນແນວໃດ?

ຄື ກາມວິຕົກ ພະຍາບາດວິຕົກ ວິຫິງສາວິຕົກ ເຫຼົ່ານີ້ຮຽກວ່າ ກິເລດຢ່າງກາງ

ກິເລດຢ່າງລະອຽດ ເປັນແນວໃດ?

ຄື ຄວາມນຶກເຖິງຍາດ ຄວາມນຶກເຖິງຊົນນະບົດ ຄວາມນຶກເພື່ອຄວາມເປັນຜູ້ບໍ່ຕາຍ ຄວາມນຶກທີ່ປະກອບດ້ວຍຄວາມອິດູຜູ້ອື່ນ ຄວາມນຶກທີ່ປະກອບດ້ວຍລາບສັກການະ ແລະຄວາມສັນເສີນ ຄວາມນຶກທີ່ປະກອບດ້ວຍຄວາມບໍ່ດູໝິ່ນ ເຫຼົ່ານີ້ ຮຽກວ່າ ກິເລດຢ່າງລະອຽດ

ພິກຂຸ ບໍ່ເພິ່ງວ່າຮ້າຍສະມະນະພາມ ແລະເທວະດາເຫຼົ່ານັ້ນດ້ວຍກິເລດຢ່າງຫຍາບ ດ້ວຍກິເລດຢ່າງກາງແດ່ ດ້ວຍກິເລດຢ່າງລະອຽດແດ່ ບໍ່ເພິ່ງກໍ່ກິເລດເປັນເຫດວ່າຮ້າຍ ຄື ບໍ່ເພິ່ງກໍ່ ບໍ່ເພິ່ງໃຫ້ເກີດ ບໍ່ເພິ່ງໃຫ້ເກີດຂຶ້ນ ບໍ່ເພິ່ງໃຫ້ບັງເກີດ ບໍ່ເພິ່ງໃຫ້ບັງເກີດຂຶ້ນ ເຊິ່ງ ກິເລດເປັນເຫດວ່າຮ້າຍ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດ ເປັນເຫດວ່າຮ້າຍ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບກິເລດເປັນເຫດວ່າຮ້າຍ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່

ຄຳວ່າ ໃນບ່ອນໃດ ໆ ໄດ້ແກ່ ໃນບ່ອນໃດ ຄື ບ່ອນໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນ ແລະພາຍນອກ ລວມຄວາມວ່າ ພິກຂຸ ຯລຯ ບໍ່ເພິ່ງກໍ່ກິເລດເປັນເຫດວ່າ ຮ້າຍໃນບ່ອນໃດ ໆ

ຄຳວ່າ ບໍ່ເພິ່ງກ່ຽວຂ້ອງໃນບ້ານ ອະທິບາຍວ່າ

ພິກຂຸກ່ຽວຂ້ອງໃນບ້ານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ກ່ຽວຂ້ອງຢູ່ກັບພວກຄະລິຫັດໃນບ້ານ ເພີດເພີນຮ່ວມກັນ ເສົ້າໂສກຮ່ວມກັນ ເມື່ອພວກເຂົາສຸກກໍສຸກດ້ວຍ ເມື່ອພວກເຂົາທຸກກໍທຸກດ້ວຍ ເມື່ອພວກເຂົາມີກິດທີ່ຄວນເຮັດເກີດຂຶ້ນ ກໍລົງມືຊ່ວຍເຫຼືອດ້ວຍຕົນເອງ ພິກຂຸຊື່ວ່າກ່ຽວຂ້ອງໃນບ້ານ ເປັນແນວນີ້ແດ່

ອີກໄນໜຶ່ງ ເວລາເຊົ້າ ພິກຂຸນຸ່ງຫົ່ມແລ້ວຖືບາດຈີວອນເຂົ້າໝູ່ບ້ານ ຫຼື ນິຄົມເພື່ອບິນທະບາດ ບໍ່ຮັກສາກາຍ ບໍ່ຮັກສາວາຈາ ບໍ່ຮັກສາຈິດ ບໍ່ຕັ້ງສະຕິ ບໍ່ສັງລວມອິນຊີທ່ານກ່ຽວຂ້ອງໃນບ່ອນນັ້ນ ໆ ຮັບໃນບ່ອນນັ້ນ ໆ ຕິດຢູ່ໃນບ່ອນນັ້ນ ໆ ເຖິງຄວາມເສື່ອມເສຍໃນບ່ອນນັ້ນ ໆ ພິກຂຸຊື່ວ່າກ່ຽວຂ້ອງໃນບ້ານ ເປັນແນວນີ້ແດ່

ພິກຂຸບໍ່ກ່ຽວຂ້ອງໃນບ້ານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ກ່ຽວຂ້ອງຢູ່ກັບພວກຄະລິຫັດໃນບ້ານ ບໍ່ເພີດເພີນ ຮ່ວມກັນ ບໍ່ເສົ້າໂສກຮ່ວມກັນ ເມື່ອພວກເຂົາສຸກ ກໍບໍ່ໄດ້ສຸກດ້ວຍ ເມື່ອພວກເຂົາທຸກ ກໍບໍ່ໄດ້ທຸກດ້ວຍ ເມື່ອພວກເຂົາມີກິດທີ່ຄວນເຮັດເກີດຂຶ້ນ ກໍບໍ່ໄດ້ລົງມືຊ່ວຍເຫຼືອດ້ວຍຕົນເອງ ພິກຂຸຊື່ວ່າບໍ່ກ່ຽວຂ້ອງໃນບ້ານ ເປັນແນວນີ້ແດ່

ອີກໄນໜຶ່ງ ເວລາເຊົ້າ ພິກຂຸນຸ່ງຫົ່ມແລ້ວຖືບາດຈີວອນເຂົ້າໝູ່ບ້ານ ຫຼື ນິຄົມເພື່ອບິນທະບາດ ຮັກສາກາຍ ຮັກສາວາຈາ ຮັກສາຈິດ ຕັ້ງສະຕິ ສັງລວມອິນຊີ ທ່ານບໍ່ກ່ຽວຂ້ອງໃນບ່ອນນັ້ນ ໆ ບໍ່ຮັບໃນບ່ອນນັ້ນ ໆ ບໍ່ຕິດຢູ່ໃນບ່ອນນັ້ນ ໆ ບໍ່ເຖິງຄວາມເສື່ອມເສຍໃນບ່ອນນັ້ນ ໆ ພິກຂຸຊື່ວ່າບໍ່ກ່ຽວຂ້ອງໃນບ້ານ ເປັນແນວນີ້ແດ່

ຄຳວ່າ ບໍ່ເພິ່ງກ່ຽວຂ້ອງໃນບ້ານ ອະທິບາຍວ່າ ບໍ່ເພິ່ງກ່ຽວຂ້ອງ ຄື ບໍ່ເພິ່ງຮັບ ບໍ່ເພິ່ງຕິດຢູ່ ບໍ່ເພິ່ງພົວພັນໃນບ້ານ ໄດ້ແກ່ ເພິ່ງເປັນຜູ້ບໍ່ຍິນດີ ບໍ່ຕິດໃຈ ບໍ່ສະຍົບ ບໍ່ມົກມຸ້ນເພິ່ງເປັນຜູ້ຄາຍຄວາມຍິນດີ ປາສະຈາກຄວາມຍິນດີ ສະລັດຖິ້ມຄວາມຍິນດີໃນບ້ານສາໄດ້ ຯລຯ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ບໍ່ເພິ່ງກ່ຽວຂ້ອງໃນບ້ານ

## ວ່າດ້ວຍການເວົ້າລຽບຄຽງ

ຄຳວ່າ ບໍ່ເພິ່ງເວົ້າລຽບຄຽງກັບຄົນຍ້ອນຢາກໄດ້ລາບ ອະທິບາຍວ່າ

ການເວົ້າລຽບຄຽງ ເປັນແນວໃດ?

ຄື ການເວົ້າຫວ່ານລ້ອມ ເວົ້າລຽບຄຽງ ເວົ້າລຽບຄຽງຢ່າງດີ ການເວົ້າຍ້ອງຍໍ ເວົ້າຍ້ອງຍໍຢ່າງດີ ການເວົ້າຜູກພັນ ເວົ້າຜູກພັນຢ່າງດີ ການເວົ້າອວດອ້າງ ເວົ້າອວດອ້າງຢ່າງດີ ການເວົ້າຄຳເປັນທີ່ຮັກ ຄວາມເປັນຜູ້ເວົ້າມຸ້ງໃຫ້ຄົນຮັກ ຄວາມເປັນຜູ້ເວົ້າບໍ່ໄວ້ວາງໃຈ ຄວາມເປັນຜູ້ເວົ້າປະຈົບ ຄວາມເປັນຜູ້ເວົ້າແຄະໄຄ້ (ກັດກິນສັນຫຼັງຂອງຜູ້ອື່ນ) ຄວາມເປັນຜູ້ເວົ້າອ່ອນຫວານ ເວົ້າ

ມ່ວນ ເວົ້າປູກໄມຕີ ເປັນຜູ້ບໍ່ເວົ້າຄໍາຫຍາບແກ່ຄົນອື່ນ ຂອງພິກຂຸຜູ້ໝັ້ນໝາຍລາບ ສັກກາຣະ ແລະຄວາມສັນເສີນ ມີຄວາມປາຖະໜາຊົ່ວ ຖືກຄວາມຢາກຄອບງໍາ ເຫັນແກ່ອາມິສ ໜັກໃນໂລກກະທໍາ ນີ້ຕັດຮຽກວ່າ ການເວົ້າລຽບຄຽງ

ອີກໄນໜຶ່ງ ພິກຂຸເວົ້າລຽບຄຽງກັບຄົນດ້ວຍເຫດ ໒ ຢ່າງ ຄື (໑) ເມື່ອວາງຕົນຕໍ່າ ຍົກຜູ້ອື່ນສູງ ເວົ້າລຽບຄຽງກັບຄົນ (໒) ເມື່ອຍົກຕົນສູງ ວາງຜູ້ອື່ນຕໍ່າ ເວົ້າລຽບຄຽງກັບຄົນ

ພິກຂຸເມື່ອວາງຕົນຕໍ່າຍົກຜູ້ອື່ນສູງ ເວົ້າລຽບຄຽງກັບຄົນ ເປັນແນວໃດ?

ຄື ພິກຂຸກ່າວວ່າ ພວກທ່ານມີອຸປະກາຣະຫຼາຍແກ່ເຮົາ ເຮົາອາໄສພວກທ່ານແລ້ວ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຍ້ອນອາໄສພວກທ່ານ ເຫັນແກ່ທ່ານ ຄົນເຫຼົ່າອື່ນຈຶ່ງສໍາຄັນເພື່ອໃຫ້ ຫຼື ເພື່ອເຮັດແກ່ເຮົາ ຊື່ເກົ່າ ທີ່ບິດາມານດາຕັ້ງໃຫ້ເຮົາກໍເລືອນຫາຍໄປແລ້ວ ເຮົາມີຄົນຮູ້ຈັກກໍຍ້ອນພວກທ່ານວ່າ ເປັນພຣະປະຈໍາຕະກູນຂອງ ອຸປາສົກນັ້ນ ເປັນພຣະປະຈໍາຕະກູນຂອງອຸປາສິການັ້ນ ພິກຂຸຊື່ວ່າວາງຕົນຕໍ່າ ຍົກຜູ້ອື່ນສູງ ເວົ້າລຽບຄຽງກັບຄົນ ເປັນແນວນີ້ແດ່

ພິກຂຸເມື່ອຍົກຕົນສູງວາງຜູ້ອື່ນຕໍ່າ ເວົ້າລຽບຄຽງກັບຄົນ ເປັນແນວໃດ?

ຄື ພິກຂຸກ່າວວ່າ ເຮົາມີອຸປະກາຣະຫຼາຍແກ່ພວກທ່ານ ພວກທ່ານອາໄສເຮົາແລ້ວຈຶ່ງຖືພຣະພຸດທະເຈົ້າ ພຣະທໍາ ແລະພຣະສົງວ່າເປັນສະຣະນະ ເວັ້ນຂາດຈາກປານາຕິບາດ ເວັ້ນຂາດຈາກອະທິນນາທານ ເວັ້ນຂາດຈາກກາເມສຸມິດສາຈານ ເວັ້ນຂາດຈາກມຸສາວາດ ເວັ້ນຂາດຈາກສຸຣາເມຣະຍະມັດຊະປະມາທັດຖານ ເຮົາໃຫ້ອຸດເທດ ໃຫ້ປະຣິປຸດສາແກ່ພວກທ່ານ ບອກອຸໂປສົດ ອໍານວຍການນະວະກໍາແກ່ພວກທ່ານ ກໍພວກທ່ານປະຖິ້ມເຮົາແລ້ວ ໄປສັກກາຣະ ກະທໍາຄວາມເຄົາລົບ ນັບຖື ບູຊາຜູ້ອື່ນ ພິກຂຸຊື່ວ່າຍົກຕົນສູງວາງຜູ້ອື່ນຕໍ່າ ເວົ້າລຽບຄຽງກັບຄົນ ເປັນແນວນີ້ແດ່

ຄໍາວ່າ ບໍ່ເພິ່ງເວົ້າລຽບຄຽງກັບຄົນຍ້ອນຢາກໄດ້ລາບ ອະທິບາຍວ່າ ພິກຂຸມຸ້ງຫວັງ ລາບ ບໍ່ເພິ່ງເວົ້າລຽບຄຽງກັບຄົນ ຍ້ອນລາບເປັນເຫດ ຍ້ອນລາບເປັນປັດໄຈຍ້ອນລາບເປັນຕົ້ນເຫດ ຍ້ອນມຸ້ງການເກີດແຫ່ງລາບໂດຍສະເພາະ ຄື ເພິ່ງລະ ບັນເທົາເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການເວົ້າລຽບຄຽງ ໄດ້ແກ່ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບການເວົ້າລຽບຄຽງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ລວມ ຄວາມວ່າ ບໍ່ເພິ່ງເວົ້າລຽບຄຽງກັບຄົນຍ້ອນຢາກໄດ້ລາບດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງດໍາຣົງຊີວິດໃນການຊື້ຂາຍ  
ບໍ່ເພິ່ງກໍ່ກິເລດເປັນເຫດວ່າຮ້າຍໃນບ່ອນໃດ ໆ  
ບໍ່ເພິ່ງກ່ຽວຂ້ອງໃນບ້ານ ແລະບໍ່ເພິ່ງເວົ້າລຽບຄຽງກັບຄົນ  
ຍ້ອນຢາກໄດ້ລາບ

[໑໙໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງເປັນຄົນມັກອວດ ບໍ່ເພິ່ງກ່າວວາຈາມຸ້ງໄດ້
ບໍ່ເພິ່ງສຶກສາຄວາມເປັນຜູ້ຄະນອງ ບໍ່ເພິ່ງກ່າວຄຳເວົ້າແກ່ງແຍ່ງ

## ວ່າດ້ວຍຜູ້ບໍ່ໂອ້ອວດ

ຄຳວ່າ ພິກຂຸບໍ່ເພິ່ງເປັນຄົນມັກອວດ ອະທິບາຍວ່າ ພິກຂຸໃນທຳວິໄນນີ້ ເປັນຜູ້ອວດເປັນຜູ້ໂອ້ອວດ ທ່ານຍ່ອມອວດ ໂອ້ອວດວ່າ "ເຮົາເປັນຜູ້ສົມບູນດ້ວຍສິນແດ່ ສົມບູນດ້ວຍ ຂໍ້ວັດແດ່ ສົມບູນດ້ວຍສິນພົດແດ່ ສົມບູນດ້ວຍຊາດແດ່ ສົມບູນດ້ວຍໂຄດແດ່ ສົມບູນດ້ວຍຄວາມເປັນບຸດຂອງຜູ້ມີຕະກູນແດ່ ສົມບູນດ້ວຍຄວາມເປັນຜູ້ມີຮູບງາມແດ່ ສົມບູນດ້ວຍຊັບແດ່ ສົມບູນດ້ວຍການສຶກສາແດ່ ສົມບູນດ້ວຍໜ້າທີ່ວຽກງານແດ່ ສົມບູນດ້ວຍຫຼັກແຫ່ງສິລະປະວິທະຍາແດ່ ສົມບູນດ້ວຍວິທະຍະຖານະແດ່ ສົມບູນດ້ວຍຄວາມເປັນຜູ້ຄົງແກ່ຮຽນແດ່ ສົມບູນດ້ວຍປະຕິພານແດ່ ສົມບູນດ້ວຍສິ່ງອື່ນນອກຈາກທີ່ກ່າວແລ້ວແດ່ ອອກບວດຈາກຕະກູນສູງແດ່ ອອກບວດຈາກຕະກູນມີຊັບຫຼາຍແດ່ ອອກບວດຈາກຕະກູນມີໂພຄະສົມບັດຫຼາຍແດ່ ເປັນຜູ້ຊົງຈຳພຣະສູດແດ່ ເປັນຜູ້ຊົງຈຳພຣະວິໄນແດ່ ເປັນພຣະທຳມະກະຖຶກແດ່ ເປັນຜູ້ຢູ່ປ່າເປັນຂໍ້ວັດແດ່ ฯລฯ ເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແດ່"

ພິກຂຸນີ້ ບໍ່ເພິ່ງອວດ ບໍ່ໂອ້ອວດແນວນີ້ ຄື ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມໂອ້ອວດ ໄດ້ແກ່ ເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນບໍ່ກ່ຽວຂ້ອງແລ້ວກັບຄວາມໂອ້ອວດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ພິກຂຸບໍ່ເພິ່ງເປັນຄົນມັກອວດ

## ວ່າດ້ວຍການກ່າວວາຈາມຸ້ງໄດ້

ຄຳວ່າ ບໍ່ເພິ່ງກ່າວວາຈາມຸ້ງໄດ້ ອະທິບາຍວ່າ

ວາຈາມຸ້ງໄດ້ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ກ່າວວາຈາມຸ້ງໄດ້ຈີວອນ ກ່າວວາຈາມຸ້ງໄດ້ບິນທະບາດກ່າວວາຈາມຸ້ງໄດ້ເສນາສະນະ ກ່າວວາຈາມຸ້ງໄດ້ຄິລານະປັດໄຈເພສັດບໍຣິຂານ ນີ້ຕັດຮຽກວ່າວາຈາມຸ້ງໄດ້

ອີກໄນໜຶ່ງ ຍ້ອນເຫດແຫ່ງຈີວອນ ຍ້ອນເຫດແຫ່ງບິນທະບາດ ຍ້ອນເຫດແຫ່ງເສນາສະນະ ຍ້ອນເຫດແຫ່ງຄິລານະປັດໄຈເພສັດບໍຣິຂານ ພິກຂຸກໍເວົ້າຈິງແດ່ ເວົ້າຕົວະແດ່ ເວົ້າສັບສໍ່ແດ່ ເວົ້າບໍ່ສັບສໍ່ແດ່ ເວົ້າຫຍາບແດ່ ເວົ້າບໍ່ຫຍາບແດ່ ເວົ້າໂລເລແດ່ ເວົ້າບໍ່ໂລເລແດ່ ເວົ້າດ້ວຍປັນຍາແດ່ ແມ່ນນີ້ກໍຕັດຮຽກວ່າ ວາຈາມຸ້ງໄດ້

ອີກໄນໜຶ່ງ ພິກຂຸມີຈິດເຫຼື້ອມໃສສະແດງທຳແກ່ຄົນພວກອື່ນ ດ້ວຍຄິດວ່າ "ໂອນໍຂໍຄົນທັງຫຼາຍເພິ່ງຟັງທຳຂອງເຮົາ ເມື່ອຟັງແລ້ວເພິ່ງເຫຼື້ອມໃສໃນທຳ ແລະຜູ້ທີ່ເຫຼື້ອມໃສແລ້ວ ກໍເພິ່ງສະແດງອາການເຫຼື້ອມໃສເຮົາ" ນີ້ກໍຕັດຮຽກວ່າ ວາຈາມຸ້ງໄດ້

ຄຳວ່າ ບໍ່ເພິ່ງກ່າວວາຈາມຸ້ງໄດ້ ອະທິບາຍວ່າ ພິກຂຸບໍ່ເພິ່ງກ່າວ ຄື ບໍ່ເພິ່ງເວົ້າ ບໍ່ເພິ່ງບອກ ບໍ່ເພິ່ງສະແດງ ບໍ່ເພິ່ງຊີ້ແຈ່ງວາຈາມຸ້ງໄດ້ ໂດຍທີ່ສຸດຈົນເຖິງວາຈາສະແດງທຳ ໄດ້ແກ່ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງວາຈາມຸ້ງໄດ້ ໄດ້ແກ່ ເປັນຜູ້ງົດງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບວາຈາມຸ້ງໄດ້ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງກ່າວວາຈາມຸ້ງໄດ້

## ວ່າດ້ວຍຄວາມຄະນອງ ໓ ຢ່າງ

ຄຳວ່າ ຄວາມເປັນຜູ້ຄະນອງ ໃນຄຳວ່າ ບໍ່ເພິ່ງສຶກສາຄວາມເປັນຜູ້ຄະນອງ ໄດ້ແກ່ຄວາມຄະນອງ ໓ ຢ່າງ ຄື

໑. ຄວາມຄະນອງທາງກາຍ
໒. ຄວາມຄະນອງທາງວາຈາ
໓. ຄວາມຄະນອງທາງໃຈ

ຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງກໍສະແດງຄວາມຄະນອງທາງກາຍ ຢູ່ໃນໝູ່ຄະນະ ຯລຯ ຢູ່ໃນສາລາທໍສັນ ຯລຯ ຢູ່ໃນເຮືອນໄຟ ຯລຯ ຢູ່ທີ່ທ່ານ້ຳ ຯລຯ ກຳລັງເຂົ້າສູ່ບໍລິເວນບ້ານ ຯລຯ ເຂົ້າສູ່ບໍລິເວນບ້ານແລ້ວ ກໍສະແດງຄວາມຄະນອງທາງກາຍ

ພິກຂຸຢູ່ໃນໝູ່ສົງສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງກໍບໍ່ເຮັດຄວາມຢຳເກງ ຢືນບຽດສຽດພິກຂຸເຖຣະແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່ ນັ່ງຄຸມຫົວແດ່ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ສົງສະແດງ ຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ຄະນະກໍບໍ່ເຮັດຄວາມຢຳເກງ ເມື່ອພິກຂຸເຖຣະບໍ່ສຸບເກີບຍ່າງຈົງກົມຢູ່ ກໍສຸບເກີບຍ່າງຈົງກົມ ເມື່ອພິກຂຸເຖຣະຍ່າງ ຈົງກົມເທິງລານຈົງກົມຕ່ຳ ກໍຍ່າງຈົງກົມເທິງລານຈົງກົມສູງ ເມື່ອພິກຂຸເຖຣະຍ່າງຈົງກົມເທິງພື້ນດິນ ກໍຍ່າງຈົງກົມເທິງລານຈົງກົມ ຢືນບຽດສຽດແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່

ນັ່ງຄຸມຫົວແດ່ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ໃນສາລາຫໍສັນສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນສາລາຫໍສັນກໍບໍ່ເຮັດຄວາມຢຳເກງນັ່ງແຊກພິກຂຸເຖຣະແດ່ ນັ່ງກີດກັນອາສະນະພິກຂຸນະວະກະແດ່ ຢືນບຽດສຽດແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່ ນັ່ງຄຸມຫົວແດ່ ຢືນເວົ້າແດ່ ແກວ່ງແຂນ ເວົ້າແດ່ ພິກຂຸຢູ່ໃນສາລາຫໍສັນ ສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ໃນເຮືອນໄຟສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນເຮືອນໄຟບໍ່ເຮັດຄວາມຢຳເກງ ຢືນບຽດສຽດພິກຂຸເຖຣະແດ່ ນັ່ງບຽດສຽດແດ່ ຢືນບັງໜ້າແດ່ ນັ່ງບັງໜ້າແດ່ ນັ່ງເທິງອາສະນະສູງແດ່ ບໍ່ບອກກ່ອນແລ້ວໃສ່ຟືນແດ່ ບໍ່ບອກກ່ອນແລ້ວອັດປະຕູແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນເຮືອນໄຟສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸຢູ່ທີ່ທ່ານ້ຳສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ທີ່ທ່ານ້ຳບໍ່ເຮັດຄວາມຢຳເກງ ລົງບຽດສຽດ ພິກຂຸເຖຣະແດ່ ລົງຂ້າງໜ້າແດ່ ອາບບຽດສຽດແດ່ ອາບຂ້າງໜ້າແດ່ ອາບເໜືອນ້ຳແດ່ ຂຶ້ນບຽດສຽດແດ່ ຂຶ້ນຂ້າງໜ້າແດ່ ຂຶ້ນເໜືອນ້ຳແດ່ ພິກຂຸຢູ່ທີ່ທ່ານ້ຳສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸກຳລັງເຂົ້າສູ່ບໍລິເວນບ້ານສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ກຳລັງເຂົ້າສູ່ບໍລິເວນບ້ານ ບໍ່ເຮັດຄວາມຢຳເກງ ຍ່າງບຽດສຽດພິກຂຸເຖຣະແດ່ ຍ່າງຂ້າງໜ້າແດ່ ຍ່າງແຊງຂຶ້ນໜ້າພິກຂຸເຖຣະແດ່ ພິກຂຸກຳລັງເຂົ້າສູ່ບໍລິເວນບ້ານສະແດງຄວາມຄະນອງທາງກາຍ ເປັນແນວນີ້

ພິກຂຸເຂົ້າສູ່ບໍລິເວນບ້ານແລ້ວສະແດງຄວາມຄະນອງທາງກາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເຂົ້າສູ່ບໍລິເວນບ້ານແລ້ວ ເມື່ອເຂົາບອກວ່າ "ຂໍຢ່າເຂົ້າໄປຂ້ານ້ອຍ" ກໍຍັງເຂົ້າໄປ ເມື່ອເຂົາບອກວ່າ "ຢ່າຢືນຂ້ານ້ອຍ" ກໍຍັງຢືນຂຶ້ນ ເມື່ອເຂົາບອກວ່າ "ຂໍຢ່ານັ່ງຂ້ານ້ອຍ" ກໍຍັງນັ່ງລົງ ເຂົ້າໄປສູ່ທີ່ເປັນໂອກາດບໍ່ສົມຄວນແດ່ ຢືນໃນທີ່ເປັນໂອກາດບໍ່ສົມຄວນແດ່ ນັ່ງໃນທີ່ເປັນໂອກາດບໍ່ສົມຄວນແດ່ ຮີບຟ້າວເຂົ້າໄປໃນຫ້ອງນ້ອຍທີ່ລັບລີ້ປົກປິດຂອງຕະກູນແດ່ ໃນຫ້ອງທີ່ກຸນລະສະຕຣີ ກຸນລະທິດາ ສະໃພ້ຂອງຕະກູນ ກຸມາຣີຂອງຕະກູນນັ່ງຢູ່ແດ່ ລູບຫົວເດັກຫຼິ້ນແດ່ ພິກຂຸເຂົ້າສູ່ບໍລິເວນບ້ານແລ້ວ ສະແດງຄວາມຄະນອງທາງກາຍເປັນແນວນີ້ ນີ້ຊື່ວ່າ ຄວາມຄະນອງທາງກາຍ

ຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງ ສະແດງຄວາມຄະນອງທາງວາຈາແດ່ ຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງວາຈາແດ່ ເຂົ້າສູ່ບໍລິເວນບ້ານແລ້ວສະແດງຄວາມຄະນອງທາງວາຈາແດ່

ພິກຂຸຢູ່ໃນໝູ່ສົງສະແດງຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ສົງບໍ່ເຮັດຄວາມຢຳເກງ ບໍ່ຮຽນແຈ້ງພິກຂຸເຖຣະຫຼືບໍ່ໄດ້ຮັບອາຣາດທະນາ ກໍສະແດງທຳ ວິສັດຊະນາບັນຫາ ສູດປາຕິໂມກແກ່ພິກຂຸທີ່ຢູ່ໃນອາຮາມ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ສົງສະແດງຄວາມຄະນອງທາງວາຈາ ເປັນແນວນີ້

ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ຢູ່ໃນໝູ່ຄະນະບໍ່ເຮັດຄວາມຢຳເກງ ບໍ່ຮຽນແຈ້ງພິກຂຸເຖຣະຫຼືບໍ່ໄດ້ຮັບອາຣາດທະນາ ກໍສະແດງທຳ ວິສັດຊະນາບັນຫາ ແກ່ພິກຂຸທີ່ຢູ່ໃນອາຮາມ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ສະແດງທຳ ວິສັດຊະນາບັນຫາແກ່ພິກຂຸນີ ອຸປາສົກ ອຸປາສິກາທີ່ຢູ່ໃນອາຮາມ ຢືນເວົ້າແດ່ ແກວ່ງແຂນເວົ້າແດ່ ພິກຂຸຢູ່ໃນໝູ່ຄະນະສະແດງຄວາມຄະນອງທາງວາຈາ ເປັນແນວນີ້

ພິກຂຸເຂົ້າສູ່ບໍລິເວນບ້ານແລ້ວສະແດງຄວາມຄະນອງທາງວາຈາ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເຂົ້າສູ່ບໍລິເວນບ້ານແລ້ວ ເວົ້າກັບສະຕີ ຫຼື ເດັກສາວແນວນີ້ວ່າ "ນາງນ້ອຍຊື່ນີ້ ນາມສະກຸນນີ້ ມີອັນໃດແດ່ລ່ະ ເຂົ້າຕົ້ມມີບໍ ເຂົ້າສຸກມີບໍ່ ຂອງຂົບຫຍ້ຳມີແດ່ບໍ່ ພວກອາດຕະມາຈັກດື່ມອັນໃດ ຈັກໄດ້ສັນອັນໃດ ຈັກຫຍ້ຳອັນໃດ ມີອັນໃດແດ່ ຫຼື ພວກທ່ານຈັກຖວາຍອັນໃດແກ່ອາດຕະມາ" ເວົ້າພ່ຳເພີ້ໄປ ພິກຂຸເຂົ້າສູ່ບໍລິເວນບ້ານແລ້ວສະແດງຄວາມຄະນອງທາງວາຈາ ເປັນແນວນີ້ ນີ້ຊື່ວ່າຄວາມຄະນອງທາງວາຈາ

ຄວາມຄະນອງທາງໃຈ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ບໍ່ແມ່ນອອກບວດຈາກຕະກູນສູງ ກໍມີຈິດວາງຕົວເຊັ່ນດຽວກັບພິກຂຸຜູ້ອອກບວດຈາກຕະກູນສູງ ບໍ່ແມ່ນອອກບວດຈາກຕະກູນທີ່ມີໂພຄະສົມບັດຫຼາຍ ຯລຯ ບໍ່ແມ່ນອອກບວດຈາກຕະກູນທີ່ມີໂພຄະສົມບັດຍິ່ງໃຫຍ່ ຯລຯ ບໍ່ແມ່ນເປັນຜູ້ຊົງຈຳພຣະສູດ ຯລຯ ບໍ່ແມ່ນເປັນຜູ້ຊົງຈຳພຣະວິໄນ ຯລຯ ບໍ່ແມ່ນເປັນພຣະທຳມະກະຖຶກ ຯລຯ ບໍ່ແມ່ນເປັນຜູ້ຢູ່ປ່າເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນ ຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ງົດອາຫານຄາບຫຼັງເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ຖືການນັ່ງເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້

ເປັນຂໍ້ວັດ ຯລຯ ບໍ່ແມ່ນເປັນຜູ້ໄດ້ປະຖົມຊານ ຯລຯ ບໍ່ແມ່ນເປັນຜູ້ໄດ້ທຸຕິຍະຊານ ຯລຯບໍ່ແມ່ນເປັນຜູ້ໄດ້ຕະຕິຍະຊານ ຯລຯ ບໍ່ແມ່ນເປັນຜູ້ໄດ້ຈະ ຕຸດຖະຊານ ຯລຯ ບໍ່ແມ່ນເປັນຜູ້ໄດ້ອາກາສານັນຈາຍະຕະນະສະມາບັດ ຯລຯ ບໍ່ແມ່ນເປັນຜູ້ໄດ້ວິນຍານັນຈາຍະຕະນະສະມາບັດ ຯລຯ ບໍ່ແມ່ນເປັນຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດ ຯລຯ ບໍ່ແມ່ນເປັນຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ກໍມີຈິດວາງຕົວເຊັ່ນດຽວກັບ ພິກຂຸຜູ້ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ນີ້ຊື່ວ່າຄວາມຄະນອງທາງໃຈ

ຄຳວ່າ ບໍ່ເພິ່ງສຶກສາຄວາມເປັນຜູ້ຄະນອງ ອະທິບາຍວ່າ ພິກຂຸບໍ່ເພິ່ງສຶກສາ ຄື ບໍ່ເພິ່ງປະພຶດບໍ່ເພິ່ງປະພຶດໂດຍເອື້ອເຟື້ອ ບໍ່ເພິ່ງສະມາທານປະພຶດຄວາມເປັນຜູ້ຄະນອງໄດ້ແກ່ ເພິ່ງລະບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເປັນຜູ້ຄະນອງ ຄື ເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມເປັນຜູ້ຄະນອງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງສຶກສາຄວາມເປັນຜູ້ຄະນອງ

ຄຳວ່າ ບໍ່ເພິ່ງກ່າວຄຳເວົ້າແກ່ງແຍ່ງ ອະທິບາຍວ່າ ຄຳເວົ້າແກ່ງແຍ່ງ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ທຳຄຳເວົ້າເຫັນປານນີ້ວ່າ "ທ່ານບໍ່ຮູ້ທຳວິໄນນີ້ ຯລຯ ຫຼືຫາກທ່ານສາມາດກໍຈົ່ງແກ້ໄຂເທີ້ນ" ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ໂມກຄັນລານະ ເມື່ອມີຄຳເວົ້າແກ່ງແຍ່ງ ກໍເພິ່ງຫວັງການຕ້ອງເວົ້າກັນຫຼາຍ ເມື່ອມີການເວົ້າກັນຫຼາຍກໍເພິ່ງຫວັງຄວາມຟຸ້ງຊ່ານ ຄົນຟຸ້ງຊ່ານກໍມີຄວາມບໍ່ສັງລວມ ຈິດຂອງຜູ້ບໍ່ສັງລວມກໍຫ່າງໄກຈາກສະມາທິ"

ຄຳວ່າ ບໍ່ເພິ່ງກ່າວຄຳເວົ້າແກ່ງແຍ່ງ ອະທິບາຍວ່າ ບໍ່ເພິ່ງກ່າວ ຄື ບໍ່ເພິ່ງເວົ້າ ບໍ່ເພິ່ງບອກ ບໍ່ເພິ່ງສະແດງ ບໍ່ເພິ່ງຊີ້ແຈ່ງຄຳເວົ້າແກ່ງແຍ່ງ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄຳເວົ້າແກ່ງແຍ່ງ ຄື ເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄຳເວົ້າແກ່ງແຍ່ງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງກ່າວຄຳເວົ້າແກ່ງແຍ່ງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງເປັນຄົນມັກອວດ ບໍ່ເພິ່ງກ່າວວາຈາມຸ້ງໄດ້  
ບໍ່ເພິ່ງສຶກສາຄວາມເປັນຜູ້ຄະນອງ ບໍ່ເພິ່ງກ່າວຄຳເວົ້າແກ່ງແຍ່ງ

[໑໖໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ  
ເມື່ອຮູ້ຕົວກໍບໍ່ເພິ່ງເຮັດຄວາມໂອ້ອວດ ແລະບໍ່ເພິ່ງດູໝິ່ນຜູ້ອື່ນ  
ດ້ວຍຄວາມເປັນຢູ່ ດ້ວຍປັນຍາ ດ້ວຍສີນແລະຂໍ້ວັດ

# ວ່າດ້ວຍມຸສາວາດ

ຄຳວ່າ ພິກຂຸບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ ອະທິບາຍວ່າ ມຸສາວາດ ຕັດຮຽກວ່າ ຄວາມເປັນຄົນເວົ້າຕົວະ ຄົນບາງຄົນໃນໂລກນີ້ ຢູ່ໃນສະພາ ຢູ່ໃນບໍລິສັດ ຯລຯ ເວົ້າຕົວະທັງທີ່ຮູ້ ຯລຯ ຍ້ອນເຫດຄື ເຫັນແກ່ອາມິດເລັກໜ້ອຍແດ່ ນີ້ຕັດຮຽກວ່າ ຄວາມເປັນຄົນເວົ້າຕົວະ

ອີກໄນໜຶ່ງ ມຸສາວາດ ມີໄດ້ດ້ວຍອາການ ๓ ຢ່າງ ຄື

๑. ກ່ອນເວົ້າທ່ານກໍຮູ້ວ່າ ເຮົາຈັກເວົ້າຕົວະ
๒. ກຳລັງເວົ້າກໍຮູ້ວ່າ ເຮົາກຳລັງເວົ້າຕົວະ
๓. ເວົ້າແລ້ວກໍຮູ້ວ່າ ເຮົາເວົ້າຕົວະແລ້ວ

ມຸສາວາດມີໄດ້ດ້ວຍອາການ ๓ ຢ່າງເຫຼົ່ານີ້

ອີກໄນໜຶ່ງ ມຸສາວາດມີໄດ້ດ້ວຍອາການ ๔ ຢ່າງ ຯລຯ ດ້ວຍອາການ ๕ ຢ່າງ ຯລຯ ດ້ວຍອາການ ๖ ຢ່າງ ຯລຯ ດ້ວຍອາການ ๗ ຢ່າງ ຯລຯ

ມຸສາວາດມີໄດ້ດ້ວຍອາການ ๘ ຢ່າງ ຄື

๑. ກ່ອນເວົ້າທ່ານກໍຮູ້ວ່າ ເຮົາຈັກເວົ້າຕົວະ
๒. ກຳລັງເວົ້າກໍຮູ້ວ່າ ເຮົາກຳລັງເວົ້າຕົວະ
๓. ເວົ້າແລ້ວກໍຮູ້ວ່າ ເຮົາເວົ້າຕົວະແລ້ວ
๔. ປິດບັງ ທິດຖິ
๕. ປິດບັງຄວາມ ພໍໃຈ
๖. ປິດບັງຄວາມ ຖືກໃຈ
๗. ປິດບັງຄວາມ ສຳຄັນ
๘. ປິດບັງຄວາມຈິງ

ມຸສາວາດມີໄດ້ດ້ວຍອາການ ๘ ຢ່າງເຫຼົ່ານີ້

ຄຳວ່າ ພິກຂຸບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ ໄດ້ແກ່ ບໍ່ເພິ່ງດຳເນີນໄປ ບໍ່ເພິ່ງມຸ້ງໝັ້ນ ຄື ບໍ່ເພິ່ງພາໄປ ບໍ່ເພິ່ງນຳ (ຕົນ) ເຂົ້າໄປໃນຄວາມເປັນຄົນເວົ້າຕົວະ ໄດ້ແກ່ ເພິ່ງລະບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເປັນຄົນເວົ້າຕົວະ ຄື ເພິ່ງເປັນຜູ້ງົດງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມເປັນຄົນເວົ້າຕົວະ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ພິກຂຸບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ

ຄຳວ່າ ເມື່ອຮູ້ຕົວກໍບໍ່ເພິ່ງເຮັດຄວາມໂອ້ອວດ ອະທິບາຍ ວ່າ

ຄວາມໂອ້ອວດ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ເປັນຄົນໂອ້ອວດ ມັກອວດອ້າງ ຄວາມໂອ້ອວດ ກິຣິຍາທີ່ໂອ້ອວດ ພາວະທີ່ໂອ້ອວດ ກິຣິຍາທີ່ຟຸ້ງເຟີ້ ຄວາມເປັນຄົນຟຸ້ງເຟີ້ ກິຣິຍາທີ່ເຫີ່ ຄວາມເປັນຄົນເຫີ່ ນີ້ຕັດຮຽກວ່າ ຄວາມໂອ້ອວດ

ຄຳວ່າ ເມື່ອຮູ້ຕົວກໍບໍ່ເພິ່ງເຮັດຄວາມໂອ້ອວດ ອະທິບາຍວ່າ ເມື່ອຮູ້ຕົວກໍບໍ່ເພິ່ງເຮັດຄວາມໂອ້ອວດ ຄື ບໍ່ເພິ່ງໃຫ້ເກີດ ບໍ່ເພິ່ງໃຫ້ເກີດຂຶ້ນ ບໍ່ເພິ່ງໃຫ້ບັງເກີດ ບໍ່ເພິ່ງໃຫ້ຄວາມໂອ້ອວດ ບັງເກີດຂຶ້ນ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມໂອ້ອວດ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມໂອ້ອວດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ເມື່ອຮູ້ຕົວກໍບໍ່ເພິ່ງເຮັດຄວາມໂອ້ອວດ

ຄຳວ່າ ແລະ ໃນຄຳວ່າ ແລະບໍ່ເພິ່ງດູໝິ່ນຜູ້ອື່ນດ້ວຍຄວາມເປັນຢູ່ ດ້ວຍປັນຍາ ດ້ວຍສີນ ແລະຂໍ້ວັດ ເປັນຄຳເຊື່ອມບົດ ຯລຯ ຄຳວ່າ ແລະ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳ ອະທິບາຍວ່າ ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ຢູ່ເສົ້າໝອງ ກໍດູໝິ່ນພິກຂຸອື່ນ ເຊິ່ງເປັນຢູ່ປະນີດວ່າ "ທຳຫຍັງພິກຂຸນີ້ຈິ່ງເປັນຢູ່ຟຸ່ມເຟືອຍ ສັນໄປໝົດທຸກຢ່າງ ຄື ຫົວພືດ ຕົ້ນພືດ ໝາກພືດ ຍອດພືດ ເມັດພືດເປັນທີ ໕ ຍ້ອນມີຄວາມພຽນຂອງສະມະນະແບບສາຍຟ້າແມບແລະພະເນີນເຫຼັກ" ພິກຂຸນັ້ນຊື່ວ່າດູໝິ່ນພິກຂຸອື່ນ ຜູ້ເປັນຢູ່ປະນີດດ້ວຍຄວາມເປັນຢູ່ເສົ້າໝອງນັ້ນ ພິກຂຸບາງອົງໃນທຳວິໄນນີ້ ເປັນຢູ່ປະນີດ ກໍດູໝິ່ນພິກຂຸອື່ນ ຜູ້ເປັນຢູ່ເສົ້າໝອງວ່າ "ເຮັດຫຍັງພິກຂຸນີ້ຈິ່ງມີບຸນໜ້ອຍ ມີສັກໜ້ອຍ ບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານເລີຍ" ພິກຂຸນັ້ນຊື່ວ່າດູໝິ່ນພິກຂຸອື່ນ ຜູ້ເປັນຢູ່ເສົ້າໝອງດ້ວຍຄວາມເປັນຢູ່ປະນີດນັ້ນ

ພິກຂຸບາງອົງໃນທຳວິໄນນີ້ ສົມບູນດ້ວຍປັນຍາ ຖືກຖາມກໍຕອບບັນຫາໄດ້ ພິກຂຸນັ້ນກໍມີຄວາມຄິດແນວນີ້ວ່າ "ເຮົາເປັນຜູ້ສົມບູນດ້ວຍປັນຍາ ສ່ວນພິກຂຸອື່ນເຫຼົ່ານີ້ ບໍ່ແມ່ນຜູ້ສົມບູນດ້ວຍປັນຍາ" ພິກຂຸນັ້ນຊື່ວ່າດູໝິ່ນພິກຂຸອື່ນດ້ວຍຄວາມສົມບູນດ້ວຍປັນຍານັ້ນ

ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ສົມບູນດ້ວຍສີນ ສັງລວມດ້ວຍການສັງວອນໃນ ປາຕິໂມກ ສົມບູນດ້ວຍອາຈາຣະແລະໂຄຈອນ ເບິ່ງເຫັນໄພໃນໂທດພຽງເລັກໜ້ອຍ ຍ່ອມສະມາທານສຶກສາໃນສິກຂາບົດທັງຫຼາຍຢູ່ ທ່ານມີຄວາມຄິດແນວນີ້ວ່າ "ເຮົາເປັນຜູ້ສົມບູນດ້ວຍສີນ ສ່ວນພິກຂຸອື່ນເຫຼົ່ານີ້ ເປັນຜູ້ທຸສີນ ເປັນຜູ້ຊົ່ວຊາມ" ພິກຂຸນັ້ນຊື່ວ່າດູໝິ່ນພິກຂຸອື່ນດ້ວຍຄວາມສົມບູນດ້ວຍສີນນັ້ນ

ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ສົມບູນດ້ວຍຂໍ້ວັດ ຄື ເປັນຜູ້ຢູ່ປ່າເປັນຂໍ້ວັດເປັນຜູ້ທ່ຽວບິນທະບາດເປັນຂໍ້ວັດ ເປັນຜູ້ນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດ ເປັນຜູ້ຊົງໄຕຣຈີວອນເປັນຂໍ້ວັດ ເປັນຜູ້ທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດ ເປັນຜູ້ງົດສັນອາຫານຄາບຫຼັງເປັນຂໍ້ວັດ ເປັນຜູ້ຖື

ການນັ່ງເປັນຂໍ້ວັດ ເປັນຜູ້ຖືການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນຂໍ້ວັດ ທ່ານມີຄວາມຄິດແນວນີ້ວ່າ "ເຮົາເປັນຜູ້ສົມບູນດ້ວຍຂໍ້ວັດ ສ່ວນພິກຂຸອື່ນເຫຼົ່ານີ້ບໍ່ແມ່ນຜູ້ສົມບູນດ້ວຍຂໍ້ວັດ" ພິກຂຸນັ້ນຊື່ວ່າດູໝິ່ນພິກຂຸອື່ນດ້ວຍຄວາມສົມບູນດ້ວຍຂໍ້ວັດນັ້ນ

ຄຳວ່າ ແລະບໍ່ເພິ່ງດູໝິ່ນຜູ້ອື່ນດ້ວຍຄວາມເປັນຢູ່ ດ້ວຍປັນຍາ ດ້ວຍສິນແລະຂໍ້ວັດ ອະທິບາຍວ່າ ບໍ່ເພິ່ງດູໝິ່ນ ຄື ບໍ່ເພິ່ງດູແຄນຜູ້ອື່ນດ້ວຍຄວາມເປັນຢູ່ເສົ້າໝອງ ຄວາມເປັນຢູ່ປະນີດ ຄວາມສົມບູນດ້ວຍປັນຍາ ຄວາມສົມບູນດ້ວຍສິນ ຫຼື ດ້ວຍຄວາມສົມບູນດ້ວຍຂໍ້ວັດ ໄດ້ແກ່ ບໍ່ເພິ່ງໃຫ້ຄວາມຖືຕົວເກີດດ້ວຍເຫດນັ້ນ ບໍ່ເພິ່ງເປັນຄົນແຂງກະດ້າງ ຫົວສູງ ດ້ວຍເຫດນັ້ນ ລວມຄວາມວ່າ ແລະບໍ່ເພິ່ງດູໝິ່ນຜູ້ອື່ນດ້ວຍຄວາມເປັນຢູ່ດ້ວຍປັນຍາ ດ້ວຍສິນແລະຂໍ້ວັດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ພິກຂຸບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ
ເມື່ອຮູ້ຕົວກໍບໍ່ເພິ່ງເຮັດຄວາມໂອ້ອວດ ແລະບໍ່ເພິ່ງດູໝິ່ນຜູ້ອື່ນ
ດ້ວຍຄວາມເປັນຢູ່ ດ້ວຍປັນຍາ ດ້ວຍສິນແລະຂໍ້ວັດ

[໑໘໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸຖືກປະທຸດສະຮ້າຍ ໄດ້ຍິນຄຳເວົ້າຫຼາຍຂອງພວກສະມະນະ ຫຼື ພວກຄົນເວົ້າຫຼາຍ ບໍ່ເພິ່ງໂຕ້ຕອບຄົນເຫຼົ່ານັ້ນດ້ວຍຄຳຫຍາບຍ້ອນຜູ້ສະງົບຍ່ອມບໍ່ສ້າງສັດຕູ

ຄຳວ່າ ຖືກປະທຸດສະຮ້າຍ ໃນຄຳວ່າ ພິກຂຸຖືກປະທຸດສະຮ້າຍໄດ້ຍິນຄຳເວົ້າຫຼາຍຂອງພວກສະມະນະ ຫຼື ພວກຄົນເວົ້າຫຼາຍ ອະທິບາຍວ່າ ຖືກປະທຸດສະຮ້າຍ ຄື ຖືກດ່າ ຖືກສຽດສີ ຖືກຢຽດຢາມ ຖືກຕິຕຽນ ຖືກວ່າຮ້າຍ

ຄຳວ່າ ຂອງພວກສະມະນະ ໄດ້ແກ່ ນັກບວດພວກໃດພວກໜຶ່ງ ຜູ້ເຂົ້າເຖິງການບວດ ຍິນຍອມບວດໃນພາຍນອກຈາກສາດສະໜານີ້

ຄຳວ່າ ພວກຄົນເວົ້າຫຼາຍ ໄດ້ແກ່ ພວກກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ແລະມະນຸດ ຄົນເຫຼົ່ານັ້ນ ເພິ່ງດ່າ ບໍຣິພາດ ຕິຕຽນ ສາບແຊ່ງ ບຽດບຽນ ຍ່ຳຍີ ທຳຮ້າຍ ຮຸກຮານ ສັ່ງຂ້າ ເຂັ່ນຂ້າ ທຳການເຂັ່ນຂ້າ ດ້ວຍວາຈາທີ່ບໍ່ເພິ່ງປາຖະໜາ ບໍ່ໜ້າຮັກ ບໍ່ໜ້າພໍໃຈຫຼາຍ ໄດ້ຍິນ ຄື ໄດ້ສະດັບ ຮຽນ ຊົງຈຳ ເຂົ້າໄປກຳນົດວາຈາທີ່ບໍ່ເພິ່ງປາຖະໜາ ບໍ່ໜ້າຮັກ ບໍ່ໜ້າພໍໃຈຫຼາຍ ຂອງຄົນພວກນັ້ນ ລວມຄວາມວ່າ ພິກຂຸຖືກປະທຸດສະຮ້າຍ ໄດ້ຍິນຄຳເວົ້າຫຼາຍຂອງພວກສະມະນະ ຫຼື ພວກຄົນເວົ້າຫຼາຍ

ຄຳວ່າ ດ້ວຍຄຳຫຍາບ ໃນຄຳວ່າ ບໍ່ເພິ່ງໂຕ້ຕອບຄົນເຫຼົ່ານັ້ນດ້ວຍຄຳຫຍາບ ອະທິບາຍວ່າ ບໍ່ເພິ່ງໂຕ້ຕອບ ຄື ບໍ່ເພິ່ງກ່າວຕອບດ້ວຍຄຳຫຍາບ ໄດ້ແກ່ ຄຳກັກຂະລະ ຄື ບໍ່ເພິ່ງດ່າຕອບຜູ້ດ່າ ບໍ່ເພິ່ງສາບແຊ່ງຕອບຜູ້ສາບແຊ່ງ ບໍ່ເພິ່ງຂັດເຄືອງຕອບຜູ້ຂັດເຄືອງ ບໍ່ເພິ່ງກໍ່ການຜິດຖຽງ

ກັນ ບໍ່ເພິ່ງກໍ່ການໝາງໃຈກັນ ບໍ່ເພິ່ງກໍ່ການແກ່ງແຍ່ງກັນ ບໍ່ເພິ່ງກໍ່ການວິວາດກັນ ບໍ່ເພິ່ງກໍ່ການມຸ້ງຮ້າຍກັນ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການຜິດຖຽງ ຄວາມຂັດເຄືອງ ຄວາມແກ່ງແຍ່ງ ການວິວາດ ຄວາມມຸ້ງຮ້າຍ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບການຜິດຖຽງ ຄວາມໝາງໃຈ ຄວາມແກ່ງແຍ່ງ ການວິວາດ ແລະ ຄວາມມຸ້ງຮ້າຍ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງໂຕ້ຕອບຄົນເຫຼົ່ານັ້ນດ້ວຍຄໍາຫຍາບ

ຄໍາວ່າ ຜູ້ສະງົບ ໃນຄໍາວ່າ ຍ້ອນຜູ້ສະງົບຍ່ອມບໍ່ສ້າງສັດຕູ ອະທິບາຍວ່າ ຊື່ວ່າຜູ້ ສະງົບ ຍ້ອນເປັນຜູ້ສະງົບຣາຄະ ຊື່ວ່າຜູ້ສະງົບ ຍ້ອນສະງົບໂທສະ ຊື່ວ່າຜູ້ສະງົບ ຍ້ອນສະງົບໂມຫະ ຄື ຊື່ວ່າຜູ້ສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ຣະງັບໄດ້ແລ້ວຍ້ອນສະງົບ ຣະງັບສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບຣະງັບໂກທະ ຯລຯ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດ ລວມຄວາມວ່າ ຜູ້ສະງົບ

ຄໍາວ່າ ຍ້ອນຜູ້ສະງົບຍ່ອມບໍ່ສ້າງສັດຕູ ອະທິບາຍວ່າ ຜູ້ສະງົບຍ່ອມບໍ່ສ້າງ ຄື ບໍ່ໃຫ້ເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນເຊິ່ງສັດຕູ ຄື ຂ້າເສິກ ສົງຄາມ ຝ່າຍກົງກັນຂ້າມ ລວມຄວາມວ່າ ຍ້ອນຜູ້ສະງົບຍ່ອມບໍ່ສ້າງສັດຕູ ດ້ວຍເຫດນັ້ນ ພຣະຜູ້ມີພຣະ ພາກເຈົ້າຈຶ່ງຕັດວ່າ

ພິກຂຸຖືກປະທຸດສະຮ້າຍ ໄດ້ຍິນຄໍາເວົ້າຫຼາຍຂອງພວກສະມະນະ
ຫຼື ພວກຄົນເວົ້າຫຼາຍ ບໍ່ເພິ່ງໂຕ້ຕອບຄົນເຫຼົ່ານັ້ນ
ດ້ວຍຄໍາຫຍາບຍ້ອນຜູ້ສະງົບຍ່ອມບໍ່ສ້າງສັດຕູ

[໑໙໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸຮູ້ທໍານີ້ແລ້ວເລືອກສັນຢູ່ ເພິ່ງເປັນຜູ້ມີສະຕິສຶກສາທຸກເມື່ອ
ຮູ້ຄວາມດັບກິເລດວ່າ ເປັນຄວາມສະງົບແລ້ວ
ກໍບໍ່ເພິ່ງຜະໝາດໃນສາດສະໜາຂອງພຣະໂຄດົມ

ຄໍາວ່າ ນີ້ ໃນຄໍາວ່າ ຮູ້ທໍານີ້ແລ້ວ ໄດ້ແກ່ ທີ່ພຣະຜູ້ມີພຣະພາກເຈົ້າຕັດບອກ ຊີ້ງສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍ ປະກາດໄວ້ແລ້ວ ອະທິບາຍວ່າ ຮູ້ ຄື ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງທໍາ ລວມຄວາມວ່າ ຮູ້ທໍານີ້ແລ້ວ ແນວນີ້ແດ່

ອີກໄນໜຶ່ງ ຮູ້ ຄື ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງທໍາທັງທີ່ສະເໝີແລະບໍ່ສະເໝີ ທັງທີ່ເປັນທາງແລະບໍ່ແມ່ນທາງ ທັງທີ່ມີໂທດແລະບໍ່ມີໂທດ ທັງຊາມແລະປະນີດ ທັງດໍາແລະຂາວ ທັງທີ່ວິນຍູຊົນຕິຕຽນແລະທີ່ວິນຍູຊົນສັນເສີນ ລວມຄວາມວ່າ ຮູ້ທໍານີ້ແລ້ວ ແນວນີ້ແດ່

ອີກໄນໜຶ່ງ ຮູ້ ຄື ຮູ້ ທຸງບຄຸງງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງແລ້ວເຊິ່ງທຳ ຄື ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ຄາດເຄື່ອນ ການປະຕິບັດເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ກ ອະຣິຍະມັກ ມີອົງ ໘ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ຮູ້ທຳນີ້ແລ້ວ ແນວນີ້ແດ່

ຄຳວ່າ ເລືອກສັນຢູ່ ໃນຄຳວ່າ ພິກຂຸ ຯລຯ ເລືອກສັນຢູ່ ເພິ່ງເປັນຜູ້ມີສະຕິສຶກສາທຸກເມື່ອ ອະທິບາຍວ່າ ເລືອກສັນຢູ່ ຄື ໄຈ້ແຍກ ທຸງບຄຸງງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງຢູ່ ໄດ້ແກ່ ເລືອກສັນຢູ່ ຄື ໄຈ້ແຍກ ທຸງບຄຸງງ ພິຈາລະນາ ເຮັດໃຫ້ກະຈ່າງແຈ້ງ ເຮັດໃຫ້ແຈ່ມແຈ້ງຢູ່ວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ພິກຂຸ ຯລຯ ເລືອກສັນຢູ່

ຄຳວ່າ ທຸກເມື່ອ ໄດ້ແກ່ ທຸກເມື່ອ ຄື ໃນການທັງປວງ ຕະຫຼອດການທັງປວງ ຯລຯ ປັດສົມໄວ

ຄຳວ່າ ເປັນຜູ້ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານກຳນົດພິຈາລະນາກາຍໃນກາຍ ຯລຯ ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ເປັນຜູ້ມີສະຕິ

ຄຳວ່າ ສຶກສາ ໄດ້ແກ່ ສິກຂາ ໓ ຄື (໑) ອະທິສີລະສິກຂາ (໒) ອະທິຈິດຕະສິກຂາ (໓) ອະທິປັນຍາສິກຂາ ຯລຯ ນີ້ຊື່ວ່າ ອະທິປັນຍາສິກຂາ ສິກຂາ ໓ ເຫຼົ່ານີ້ ເມື່ອພິກຂຸນຶກເຖິງຊື່ວ່າເພິ່ງສຶກສາ ຯລຯ ຊື່ວ່າເພິ່ງສຶກສາ ຄືເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ພິກຂຸ ຯລຯ ເລືອກສັນຢູ່ ເພິ່ງເປັນຜູ້ມີສະຕິສຶກສາທຸກເມື່ອ

ຄຳວ່າ ຮູ້ຄວາມດັບກິເລດວ່າ ເປັນຄວາມສະງົບແລ້ວ ອະທິບາຍວ່າ ຮູ້ ຄື ຮູ້ ທຸງບຄຸງງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງຄວາມດັບຣາຄະ ວ່າເປັນຄວາມສະງົບ ຯລຯ ຄວາມດັບໂທສະ ຯລຯ ຄວາມດັບໂມຫະ ຯລຯ ຄວາມດັບອະກຸສະລາພິສັງຂານທຸກປະເພດວ່າເປັນຄວາມສະງົບແລ້ວ ລວມຄວາມວ່າ ຮູ້ຄວາມດັບວ່າ ເປັນຄວາມສະງົບແລ້ວ

ຄຳວ່າ ກໍບໍ່ເພິ່ງຜະໝາດໃນສາດສະໜາຂອງພຣະໂຄດົມ ໄດ້ແກ່ ໃນສາດສະໜາຂອງພຣະງົວ ດົມ ຄື ໃນສາດສະໜາຂອງພຣະພຸດທະເຈົ້າ ໃນສາດສະໜາຂອງພຣະຊິນນະເຈົ້າ ໃນສາດສະໜາຂອງພຣະຕະຖາຄົດ ໃນສາດສະໜາຂອງພຣະຜູ້ເປັນເໝືອນເທບ ໃນສາດສະໜາຂອງພຣະອະຣະຫັນ

ຄຳວ່າ ບໍ່ເພິ່ງຜະໝາດ ອະທິບາຍວ່າ ເພິ່ງເປັນຜູ້ເຮັດໂດຍເອື້ອເຟື້ອ ເຮັດຕິດຕໍ່ ເຮັດບໍ່ຢຸດ ປະພຶດບໍ່ທໍ້ຖອຍ ບໍ່ລະຄວາມພໍໃຈ ບໍ່ຖິ້ມເບົາ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ຄື ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມມີເຫື່ອແຮງ ຄວາມບໍ່ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາເພິ່ງເຮັດສີນຂັນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນໂດຍ ອຸບາຍແນວໃດ ຯລຯ ວ່າ ເຮົາເພິ່ງເຮັດສະມາທິຂັນ ຯລຯ ປັນຍາຂັນ ຯລຯ ວິມຸດຕິຂັນ ຯລຯ ວິມຸດຕິຍານະທັດສະນະຂັນທີ່ຍັງບໍ່ບໍລິບູນໃຫ້ບໍລິບູນໂດຍອຸບາຍແນວໃດ ຄື ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມມີເຫື່ອແຮງ ຄວາມບໍ່ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາເພິ່ງກຳນົດຮູ້ທຸກທີ່ຍັງບໍ່ໄດ້ກຳນົດຮູ້ ເພິ່ງລະກິເລດທີ່ຍັງບໍ່ໄດ້ລະ ເພິ່ງຈະເລີນມັກທີ່ຍັງບໍ່ໄດ້ຈະເລີນ ຫຼື ເພິ່ງເຮັດໃຫ້ແຈ້ງນິໂຣດທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງໂດຍອຸບາຍແນວໃດ ດັ່ງນີ້ ຊື່ວ່າ ຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ລວມຄວາມວ່າ ກໍບໍ່ເພິ່ງຜະໝາດໃນສາດສະໜາຂອງພຣະໂຄດົມ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ພິກຂຸຮູ້ທຳນີ້ແລ້ວເລືອກສັນຢູ່ ເພິ່ງເປັນຜູ້ມີສະຕິສຶກສາທຸກເມື່ອ ຮູ້ຄວາມດັບກິເລດວ່າເປັນຄວາມສະຫງົບແລ້ວ ກໍບໍ່ເພິ່ງຜະໝາດໃນສາດສະໜາຂອງພຣະໂຄດົມ

[໑໖໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າດັ່ງນີ້)

ພິກຂຸນັ້ນເປັນຜູ້ຄອບງຳ ບໍ່ຖືກຄອບງຳ ໄດ້ເຫັນທຳທີ່ເປັນພະຍານ ເຊິ່ງບໍ່ຕ້ອງເຊື່ອໃຜຍ້ອນແນວນັ້ນ ທ່ານເພິ່ງເປັນຜູ້ບໍ່ຜະໝາດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນນອບນ້ອມຢູ່ ເພິ່ງໝັ່ນສຶກສາທຸກເມື່ອ

ຄຳວ່າ ເປັນຜູ້ຄອບງຳ ໃນຄຳວ່າ ກໍພິກຂຸນັ້ນເປັນຜູ້ຄອບງຳ ບໍ່ຖືກຄອບງຳ ອະທິບາຍວ່າ ພິກຂຸນັ້ນເປັນຜູ້ຄອບງຳຮູບ  ຄອບງຳສຽງ ຄອບງຳກິ່ນ ຄອບງຳຣົດ ຄອບງຳໂຜດຖັບພະ ຄອບງຳທຳມາຣົມ ບໍ່ຖືກກິເລດໃດ ໆ ຄອບງຳເລີຍ ພິກຂຸເພິ່ງເປັນຜູ້ຄອບງຳບາບອະກຸສົນທຳເຫຼົ່ານັ້ນເຊິ່ງເປັນເຫດໃຫ້ເກີດຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນ ວິບາກເປັນບ່ອນຕັ້ງແຫ່ງຊາດ ຊະຣາ ແລະມໍຣະນະຕໍ່ໄປ ລວມຄວາມວ່າ ກໍພິກຂຸນັ້ນເປັນຜູ້ຄອບງຳ ບໍ່ຖືກຄອບງຳ

ຄຳວ່າ ທຳທີ່ເປັນພະຍານ ໃນຄຳວ່າ ໄດ້ເຫັນທຳທີ່ເປັນພະຍານ ເຊິ່ງບໍ່ຕ້ອງເຊື່ອໃຜ ອະທິບາຍວ່າ ໄດ້ເຫັນ ຄື ໄດ້ແນມເຫັນ ໄດ້ ໄດ້ແທງຕະຫຼອດທຳທີ່ປະຈັກແກ່ຕົນ ທຳທີ່ຮູ້ດ້ວຍຕົນເອງ ບໍ່ແມ່ນໂດຍອາການເຊື່ອຜູ້ອື່ນວ່າ ທຳນີ້ເປັນດັ່ງນີ້ ທຳນີ້ເປັນດັ່ງນີ້ ບໍ່ແມ່ນໂດຍການເລົ່າລື ບໍ່ແມ່ນໂດຍການຖືສືບ ໆ ກັນມາ ບໍ່ແມ່ນໂດຍການອ້າງຕຳລາ ບໍ່ແມ່ນໂດຍຕັກກະ ບໍ່ແມ່ນ

ໂດຍການອະນຸມານ ບໍ່ແມ່ນໂດຍການຄິດຕອງຕາມແນວເຫດຜົນ ບໍ່ແມ່ນຍ້ອນເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ ລວມຄວາມວ່າ ໄດ້ເຫັນທຳທີ່ເປັນພະຍານ ເຊິ່ງບໍ່ຕ້ອງເຊື່ອໃຜ

ຄຳວ່າ ຍ້ອນແນວນັ້ນ ໃນຄຳວ່າ ຍ້ອນແນວນັ້ນ ຯລຯ ໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໄດ້ແກ່ ຍ້ອນແນວນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ

ຄຳວ່າ ໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ອະທິບາຍວ່າ ໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຄື ໃນສາດສະໜາຂອງພຣະໂຄດົມ ໃນສາດສະໜາຂອງພຣະພຸດທະເຈົ້າ ໃນສາດສະໜາຂອງພຣະຊິນນະເຈົ້າ ໃນສາດສະໜາຂອງພຣະຕະຖາຄົດ ໃນສາດສະໜາຂອງພຣະຜູ້ເປັນເໝືອນເທບ ໃນສາດສະໜາຂອງພຣະອະຣະຫັນ ລວມຄວາມວ່າ ຍ້ອນແນວນັ້ນ ຯລຯ ໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ຄຳວ່າ ທ່ານເພິ່ງເປັນຜູ້ບໍ່ຜະໝາດ ໃນຄຳວ່າ ເພິ່ງເປັນຜູ້ບໍ່ຜະໝາດ ຯລຯ ນອບນ້ອມຢູ່ ເພິ່ງໝັ່ນສຶກສາທຸກເມື່ອ ໄດ້ແກ່ ເພິ່ງເປັນຜູ້ທຳຕໍ່ເນື່ອງ ຯລຯ ຊື່ວ່າ ບໍ່ຜະໝາດໃນກຸສົນທຳທັງຫຼາຍ

ຄຳວ່າ ທຸກເມື່ອ ໄດ້ແກ່ ທຸກເມື່ອ ຄື ໃນການທັງປວງ ຯລຯ ປັດສິມໄວ

ຄຳວ່າ ນອບນ້ອມຢູ່ ໄດ້ແກ່ ນອບນ້ອມຢູ່ ຄື ສັກກາຣະ ເຄົາລົບ ນັບຖື ບູຊາ ຢຳເກງດ້ວຍກາຍ ວາຈາ ໃຈ ປະຕິບັດເອື້ອປະໂຫຍດ ປະຕິບັດທຳຕາມຫຼັກທຳ

ຄຳວ່າ ເພິ່ງໝັ່ນສຶກສາ ໄດ້ແກ່ ສິກຂາ ໓ ຄື (໑) ອະທິສີລະສິກຂາ (໒) ອະທິຈິດຕະສິກຂາ (໓) ອະທິປັນຍາສິກຂາ ຯລຯ ນີ້ຊື່ວ່າອະທິປັນຍາສິກຂາ ສິກຂາ ໓ ເຫຼົ່ານັ້ນເມື່ອພິກຂຸນຶກເຖິງ ຊື່ວ່າເພິ່ງສຶກສາ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າ ເພິ່ງສຶກສາ ຄືເພິ່ງປະພຶດເອື້ອເຟື້ອ ປະພຶດໂດຍເອື້ອເຟື້ອໂດຍຊອບ ສະມາທານປະພຶດ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້ານີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ທ່ານເພິ່ງເປັນຜູ້ບໍ່ຜະໝາດ ຯລຯ ນອບນ້ອມຢູ່ ເພິ່ງໝັ່ນສຶກສາທຸກເມື່ອ ດ້ວຍເຫດນັ້ນ (ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດດັ່ງນີ້)

ພິກຂຸນັ້ນເປັນຜູ້ຄອບງຳ ບໍ່ຖືກຄອບງຳ
ໄດ້ເຫັນທຳທີ່ເປັນພະຍານ ເຊິ່ງບໍ່ຕ້ອງເຊື່ອໃຜ
ຍ້ອນແນວນັ້ນ ທ່ານເພິ່ງເປັນຜູ້ບໍ່ຜະໝາດໃນສາດສະໜາ
ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ນອບນ້ອມຢູ່ ເພິ່ງໝັ່ນສຶກສາຢູ່ທຸກເມື່ອ

**ຕຸວະຕະກະສຸດຕະນິດເທດທີ ໑໔ ຈົບ**

# ໑໕. ອັດຕະທັນດະສຸດຕະນິດເທດ

## ອະທິບາຍອັດຕະທັນດະສູດ

### ວ່າດ້ວຍຄວາມຢ້ານເກີດຈາກໂທດຂອງຕົນ

ພຣະສາຣີບຸດເຖຣະຈະກ່າວອະທິບາຍອັດຕະທັນດະສູດ ດັ່ງຕໍ່ໄປນີ້

[໑໗໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄວາມຢ້ານເກີດຈາກໂທດຂອງຕົນ
ທ່ານທັງຫຼາຍຈົ່ງແນມເບິ່ງຄົນທີ່ມຸ້ງຮ້າຍກັນ
ເຮົາຈັກກ່າວຄວາມສັງເວດຕາມທີ່ເຮົາເຄີຍສັງເວດມາແລ້ວ

ຄຳວ່າ ໂທດ ໃນຄຳວ່າ ຄວາມຢ້ານເກີດຈາກໂທດຂອງຕົນ ໄດ້ແກ່ ໂທດ ໓ ຢ່າງ ຄື

໑. ໂທດທາງກາຍ
໒. ໂທດທາງວາຈາ
໓. ໂທດທາງໃຈ

ກາຍທຸດຈະຣິດ ໓ ຢ່າງ ຊື່ວ່າ ໂທດທາງກາຍ
ວະຈີທຸດຈະຣິດ ໔ ຢ່າງ ຊື່ວ່າ ໂທດທາງວາຈາ
ມະໂນທຸດຈະຣິດ ໓ ຢ່າງ ຊື່ວ່າ ໂທດທາງໃຈ

ຄຳວ່າ ຄວາມຢ້ານ ໄດ້ແກ່ ຄວາມຢ້ານ ໒ ຢ່າງ ຄື (໑) ຄວາມຢ້ານໃນປັດຈຸບັນ (໒) ຄວາມຢ້ານໃນສຳປະຣາຍິກະພົບ

ຄວາມຢ້ານໃນປັດຈຸບັນ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ປະພຶດທຸດຈະຣິດທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຂ້າສັດແດ່ ລັກຊັບແດ່ ຕັດປ່ອງຢ່ອງເບົາແດ່ ລັກຍົກເຄົ້າແດ່ ປຸ້ນບ້ານແດ່ ດັກຈີ້ໃນທາງປ່ຽວແດ່ ລະເມີດພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ພວກຣາດຊະບຸຣຸດຈັບບຸກຄົນນັ້ນໄດ້ ຈຶ່ງທູນສະແດງແດ່ພຣະຣາຊາວ່າ ຂໍເດຊະ ຜູ້ນີ້ເປັນໂຈນ ປະພຶດຊົ່ວ ຂໍຈົ່ງຊົງລົງອາຍາຕາມທີ່ຊົງພຣະຣາດຊະປະສົງແກ່ບຸກຄົນນີ້ເທີ້ນ ພຣະຣາຊາຍ່ອມຊົງບໍຣິພາດບຸກຄົນນັ້ນ ຍ້ອນການບໍຣິພາດເປັນປັດໄຈ ເຂົາຍ່ອມເກີດຄວາມຢ້ານແລ້ວສະເຫວີຍທຸກແລະໂທມະນັດແດ່

ຄວາມຢ້ານ ທຸກ ແລະ ໂທມະນັດຂອງເຂົານີ້ ເກີດຈາກອັນໃດ ຄວາມຢ້ານ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດຈາກໂທດຂອງຕົນ

ພຣະຣາຊາບໍ່ຊົງພໍພຣະທະໄທແມ່ນພຽງເທົ່ານັ້ນ ຊົງໃຫ້ຈອງຈຳບຸກຄົນນັ້ນດ້ວຍເຄື່ອງຈອງຈຳຄືຊື່ຄາແດ່ ເຄື່ອງຈອງຈຳຄືເຊືອກແດ່ ເຄື່ອງຈອງຈຳຄືໂຊ່ຕວນແດ່ ເຄື່ອງຈອງຈຳຄືຫວາຍແດ່ ເຄື່ອງຈອງຈຳຄືເຄືອເຂົາແດ່ ເຄື່ອງຈອງຈຳຄືຄຸກແດ່ ເຄື່ອງຈອງຈຳຄືເຮືອນຂັງແດ່ ເຄື່ອງຈອງຈຳຄືໝູ່ບ້ານແດ່ ເຄື່ອງຈອງຈຳຄືນິຄົມແດ່ ເຄື່ອງຈອງຈຳຄືເມືອງແດ່ ເຄື່ອງຈອງຈຳຄືຣັດແດ່ ເຄື່ອງຈອງຈຳຄືຊົນນະບົດແດ່ ໂດຍທີ່ສຸດ ຊົງມີພຣະຣາດຊະໂອງການວ່າ ພວກມັນອອກໄປຈາກບ່ອນນີ້ບໍ່ໄດ້ ບຸກຄົນນັ້ນຍ່ອມສະເຫວີຍທຸກແລະໂທມະນັດ ຍ້ອນຖືກຈອງຈຳເປັນປັດໄຈແດ່ ຄວາມຢ້ານ ທຸກ ແລະ ໂທມະນັດຂອງເຂົານີ້ ເກີດຈາກອັນໃດ ຄວາມຢ້ານ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດ ຈາກໂທດຂອງຕົນ

ພຣະຣາຊາບໍ່ຊົງພໍພຣະທະໄທແມ່ນພຽງເທົ່ານີ້ ຊົງໃຫ້ປັບໄໝຊັບຂອງເຂົາ ໑໐໐ ແດ່ ໑,໐໐໐ ແດ່ ໑໐໐,໐໐໐ ແດ່ ບຸກຄົນນັ້ນກໍສະເຫວີຍທຸກ ແລະໂທມະນັດ ຍ້ອນການໝົດເປືອງຊັບເປັນປັດໄຈ ຄວາມຢ້ານ ທຸກ ແລະ ໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດຈາກໂທດຂອງຕົນ

ພຣະຣາຊາບໍ່ຊົງພໍພຣະທະໄທພຽງເທົ່ານີ້ ຊົງຮັບສັ່ງໃຫ້ຈັບເຂົາລົງອາຍາດ້ວຍປະການຕ່າງ ໆ ຄື ໃຫ້ຄ້ຽນດ້ວຍແສ້ແດ່ ໃຫ້ຄ້ຽນດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ພອງແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ຖະລົກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຢັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນຕົວຣົດນ້ຳມັນໃສ່ແລ້ວຈຸດໄຟເຜົາແດ່ ພັນມືແລ້ວຈຸດໄຟຕ່າງທວນໄຟແດ່ ຖະລົກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ຖະລົກໜັງຕັ້ງແຕ່ຄໍເຖິງບັ້ນແອວ ເຮັດໃຫ້ແນມເບິ່ງເໝືອນນຸ່ງຜ້າຄາກອງແດ່ ສວມປອກເຫຼັກທີ່ແຂນສອກແລະເຂົ່າແລ້ວສຽບຫຼາວທັງຫ້າທິດເອົາໄຟເຜົາແດ່ ໃຊ້ເບັດກ່ຽວໜັງ ຊີ້ນ ເອັນອອກມາແດ່ ປາດຊີ້ນອອກເປັນຕ່ອນ ໆ ເໝືອນຫຼຽນກະສາບແດ່ ປາດໜັງຊີ້ນເອັນອອກ ເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຊ່ອງຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາໝຸນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວຖະລົກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຣົດຕົວດ້ວຍນ້ຳມັນທີ່ກຳລັງຮ້ອນຟົດແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ເອົາດາບຕັດຫົວແດ່ ບຸກຄົນນັ້ນຍ່ອມສະເຫວີຍທຸກ ແລະ ໂທມະນັດ ຍ້ອນການລົງໂທດເປັນປັດໄຈ ຄວາມຢ້ານ ທຸກ ແລະ ໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດຈາກໂທດຂອງຕົນ ພຣະຣາຊາຊົງເປັນໃຫຍ່ໃນໂທດ ໔ ຊະນິດເຫຼົ່ານີ້

ຫຼັງຈາກຕາຍແລ້ວ ບຸກຄົນນັ້ນຍ່ອມເຂົ້າເຖິງອະບາຍ ທຸດຄະຕິ ວິນິບາດ ນະຮົກ ຍ້ອນກຳຂອງຕົນ ພວກນາຍນິຣະຍະບານ ກໍລົງໂທດ ມີການຈອງຈຳ ៥ ຢ່າງ ຄື (ຈັບເຂົານອນຫງາຍແລ້ວ) (໑) ເອົາຫຼາວເຫຼັກຕຶງທີ່ມືຂວາ (໒) ຕຶງທີ່ມືຊ້າຍ (໓) ຕຶງທີ່ຕີນຂວາ (໔) ຕຶງທີ່ຕີນຊ້າຍ (໕) ຕຶງທີ່ກາງເອິກ ເຂົາສະເຫວີຍທຸກຂະເວທະນາຢ່າງເຜັດຮ້ອນໃນນະຮົກນັ້ນ ແຕ່ຍັງບໍ່ຕາຍຕາບເທົ່າທີ່ບາບກຳນັ້ນຍັງບໍ່ໝົດສິ້ນໄປ ຄວາມຢ້ານ ທຸກ ແລະ ໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດຈາກໂທດຂອງຕົນ

ພວກນາຍນິຣະຍະບານໃຫ້ເຂົານອນລົງແລ້ວຖາກດ້ວຍຫອກ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກເຜັດຮ້ອນ ແຕ່ຍັງບໍ່ຕາຍຕາບເທົ່າທີ່ບາບກຳນັ້ນຍັງບໍ່ໝົດສິ້ນໄປ ພວກນາຍນິຣະຍະບານຈັບເຂົາເອົາຕີນຂຶ້ນ ເອົາຫົວລົງ ເອົາມີດປາດ ຈັບເຂົາຫງຸມລົດແລ່ນກັບໄປກັບມາເທິງພື້ນອັນຮ້ອນລຸກເປັນແປວລຸກໂຊດຊ່ວງ ຯລຯ ບັງຄັບເຂົາຂຶ້ນລົງພູເຂົາຖ່ານໄຟລູກໃຫຍ່ທີ່ໄຟລຸກໂຊນໂຊດຊ່ວງແດ່ ຯລຯ ຈັບເຂົາເອົາຕີນຂຶ້ນເອົາຫົວຖິ້ມລົງໃນໂລຫະກຸມພີອັນຮ້ອນແດງລຸກເປັນແສງໄຟ ເຂົາຖືກຕົ້ມເດືອດຈົນຕົວພອງໃນໂລຫະກຸມພີນັ້ນ ບາງເວລາລອຍຟູຂຶ້ນ ບາງເທື່ອຈົມລົງບາງເທື່ອລອຍຟູຂວາງ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກເຜັດຮ້ອນໃນໂລຫະກຸມພີອັນຮ້ອນແດງນັ້ນ ແຕ່ຍັງບໍ່ຕາຍຕາບເທົ່າທີ່ບາບກຳນັ້ນຍັງບໍ່ໝົດສິ້ນໄປ ຄວາມຢ້ານທຸກ ແລະ ໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນຜາກົດຈາກໂທດຂອງຕົນ ພວກນາຍນິຣະຍະບານຈຶ່ງຖິ້ມເຂົາລົງໃນມະຫານະຮົກ ກໍມະຫານະຮົກນັ້ນ

ມີ ໔ ແຈ ໔ ປະຕູ ແບ່ງອອກເປັນສ່ວນ
ມີກຳແພງເຫຼັກລ້ອມຮອບ ຄອບດ້ວຍຝາເຫຼັກ
ມະຫານະຮົກນັ້ນ ມີພື້ນເປັນເຫຼັກ ລຸກໂຊນໂຊດຊ່ວງ
ແຜ່ໄປໄກຂ້າງລະ ໑໐໐ ໂຍດ ຕັ້ງຢູ່ຕະລອດເວລາ
ມະຫານະຮົກອັນນ່າສະຍົດສະຫຍອງ ແຜດເຜົາສັດໃຫ້ມີທຸກ
ຮ້ອນແຮງ ມີແປວໄຟ ເຂົ້າໃກ້ໄດ້ຍາກ ໜ້າຂົນລຸກ
ໜ້າພັ່ນພຶງ ເປັນຕາຢ້ານ ເປັນທຸກ
ມີກອງໄຟລຸກຂຶ້ນຈາກຝາດ້ານທິດຕາເວັນອອກ
ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານທິດຕາເວັນຕົກ
ມີກອງໄຟລຸກຂຶ້ນຈາກຝາດ້ານທິດຕາເວັນຕົກ
ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານທິດຕາເວັນອອກ
ມີກອງໄຟລຸກຂຶ້ນຈາກດ້ານທິດເໜືອ
ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານທິດໃຕ້
ມີກອງໄຟລຸກຂຶ້ນຈາກດ້ານໃຕ້

ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານທິດເໜືອ
ກອງໄຟທີ່ໜ້າສະພຶງຢ້ານ ຜຸດຂຶ້ນມາຈາກເບື້ອງລຸ່ມ
ແຜດເຜົາສັດຜູ້ມີບາບກຳ (ລຸກຖ້ວມ) ຕິດຫຼັງຄາ
ກອງໄຟໜ້າສະພຶງຢ້ານ ລຸກຂຶ້ນມາຈາກຫຼັງຄາ
ແຜດເຜົາສັດຜູ້ມີບາບກຳ (ລາມລົງ) ກະທົບເຖິງພື້ນ
ອະເວຈີມະຫານະຮົກ ທັງຂ້າງລຸ່ມຂ້າງເທິງ ດ້ານຂ້າງ
ກໍເໝືອນກັບແຜ່ນເຫຼັກທີ່ຖືກໄຟເຜົາລົນ ຮ້ອນຮົນໂຊດຊ່ວງຢູ່ສະເໝີ
ສັດທັງຫຼາຍທີ່ຫຍາບຊ້າ ເຮັດກຳຊົ່ວຮ້າຍແຮງໄວ້ຫຼາຍ
ເປັນຜູ້ມີບາບກຳໂດຍສ່ວນດຽວ
ມອດໄໝ້ຢູ່ໃນອະເວຈີມະຫານະຮົກນັ້ນ ແຕ່ກໍຍັງບໍ່ຕາຍ
ຮ່າງກາຍຂອງສັດທີ່ຢູ່ໃນນະຮົກເຫຼົ່ານັ້ນ
ເປັນຄືກ້ອນໄຟທີ່ໄໝ້ລຸກຮຸ່ງແຈ້ງຢູ່
ຂໍທ່ານຈົ່ງເບິ່ງຄວາມຮ້າຍແຮງໝັ້ນຄົງຂອງກຳນັ້ນເທີ້ນ
ບໍ່ມີຂີ້ເຖົ່າ ແລະຄວັນໄຟເລີຍ
ສັດນະຮົກທັງຫຼາຍ ແລ່ນໜີໄປທາງທິດຕາເວັນອອກ
ຈາກທິດຕາເວັນອອກນັ້ນ ກໍແລ່ນໄປທາງທິດຕາເວັນຕົກແລ້ວແລ່ນໄປທາງທິດເໜືອ
ຈາກທາງທິດເໜືອນັ້ນ ກໍແລ່ນໄປທາງທິດໃຕ້
ບໍ່ວ່າຈະແລ່ນໄປສູ່ທິດໃດ ໆ ປະຕູໃນທິດນັ້ນ ໆ ກໍອັດປິດກັ້ນສັດເຫຼົ່ານັ້ນໄວ້
ສັດເຫຼົ່ານັ້ນ ມີປາດຖະໜາຈະອອກໜີອອກໄປຈາກທີ່ນັ້ນໃຫ້ໄດ້
ຈຶ່ງພາກັນດີ້ນລົນທ່ຽວສະແຫວງຫາທາງອອກຢູ່ບໍ່ເຊົາ
ແຕ່ສັດເຫຼົ່ານັ້ນ ກໍບໍ່ສາມາດຈະໜີອອກໄປຈາກມະຫານະຮົກນັ້ນໄດ້
ຍ້ອນກຳຊົ່ວທີ່ສັດເຫຼົ່ານັ້ນເຮັດໄວ້ຫຼາຍ ເປັນປັດໄຈລ້ຽງໄວ້
ເຮັດໃຫ້ມີຜົນບໍ່ຈົບສິ້ນ

ຄວາມຢ້ານ ທຸກແລະໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານເກີດຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດຈາກໂທດຂອງຕົນ ທຸກຂອງສັດນະຮົກກໍດີ ທຸກຂອງສັດທີ່ເກີດໃນກຳເນີດເດຍຣັດສານກໍດີ ທຸກຂອງສັດທີ່ເກີດໃນເຜດວິໄສກໍດີ ທຸກຂອງມະນຸດກໍດີ ເກີດມາຈາກອັນໃດ ຄື ເກີດຂຶ້ນມາຈາກໃສ ບັງເກີດມາຈາກໃສ ບັງເກີດຂຶ້ນມາຈາກໃສ ຜາກົດມາຈາກໃສ

ທຸກເຫຼົ່ານັ້ນ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດຈາກໂທດຂອງຕົນ ລວມຄວາມວ່າ ຄວາມຢ້ານເກີດຈາກໂທດຂອງຕົນ

ຄຳວ່າ ຄົນ ໃນຄຳວ່າ ທ່ານທັງຫຼາຍຈົ່ງແນມເບິ່ງຄົນທີ່ມຸ້ງຮ້າຍກັນ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາແລະມະນຸດ ອະທິບາຍວ່າ ທ່ານທັງຫຼາຍ ຈົ່ງແນມ

ເບິ່ງ ຄື ຈົ່ງແລເບິ່ງ ກວດເບິ່ງ ເພ່ງພິນິດ ພິຈາລະນາເບິ່ງຄົນທີ່ມຸ້ງຮ້າຍກັນ ຄື ຄົນທີ່ຜິດຖຽງກັນ ຄົນທີ່ທຳຮ້າຍກັນ ຄົນທີ່ທຳຮ້າຍຕອບກັນ ຄົນທີ່ຂຸ່ນເຄືອງກັນ ຄົນທີ່ຂຸ່ນເຄືອງຕອບກັນ ຄົນທີ່ອາຄາດກັນ ຄົນທີ່ອາຄາດຕອບກັນ ລວມຄວາມວ່າ ທ່ານທັງຫຼາຍຈົ່ງແນມເບິ່ງຄົນທີ່ມຸ້ງຮ້າຍກັນ

ຄຳວ່າ ເຮົາຈັກກ່າວຄວາມສັງເວດ ອະທິບາຍວ່າ ຄວາມສັງເວດ ຄື ຄວາມສະດຸ້ງ ຄວາມຫວາດສຽວ ຄວາມຢ້ານ ຄວາມບິບຄັ້ນ ຄວາມກະທົບ ຄວາມບຽດບຽນ ຄວາມຂັດຂ້ອງ

ຄຳວ່າ ຈັກກ່າວ ໄດ້ແກ່ ຈັກກ່າວ ຄື ຈັກບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ເຮົາຈັກກ່າວຄວາມສັງເວດ

ຄຳວ່າ ຕາມທີ່ເຮົາເຄີຍສັງເວດມາແລ້ວ ອະທິບາຍວ່າ ຕາມທີ່ເຮົາສັງເວດ ຄື ສະດຸ້ງເຖິງຄວາມສັງເວດມາແລ້ວ ດ້ວຍຕົນເອງແລ ລວມຄວາມວ່າ ຕາມທີ່ເຮົາເຄີຍສັງເວດມາແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈິ່ງຕັດວ່າ

ຄວາມຢ້ານເກີດຈາກໂທດຂອງຕົນ
ທ່ານທັງຫຼາຍຈົ່ງແນມເບິ່ງຄົນທີ່ມຸ້ງຮ້າຍກັນ
ເຮົາຈັກກ່າວຄວາມສັງເວດຕາມທີ່ເຮົາເຄີຍສັງເວດມາແລ້ວ

[໑໗໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍ້ອນເຫັນໝູ່ສັດຜູ້ດີ້ນຮົນຢູ່
ເໝືອນຝູງປາໃນບໍ່ທີ່ມີນ້ຳນ້ອຍ
ຍ້ອນເຫັນສັດທີ່ທຳຮ້າຍກັນແລະກັນ ໄພຈຶ່ງຜາກົດແກ່ເຮົາ

## ວ່າດ້ວຍທຸກຕ່າງ ໆ

ຄຳວ່າ ໝູ່ສັດ ໃນຄຳວ່າ ຍ້ອນເຫັນໝູ່ສັດຜູ້ດີ້ນຮົນຢູ່ ເປັນຄຳຕັດຮຽກສັດ ອະທິບາຍວ່າ ໝູ່ສັດຜູ້ດີ້ນຮົນຢູ່ ຄື ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະສັບກະສ່າຍ ດ້ວຍຄວາມດີ້ນຮົນຍ້ອນຕັນຫາ ດີ້ນຮົນຍ້ອນທິດຖິ ດີ້ນຮົນຍ້ອນກິເລດ ດີ້ນຮົນຍ້ອນທຸດຈະຣິດ ດີ້ນຮົນຍ້ອນການປະກອບ ດີ້ນຮົນຍ້ອນວິບາກ ຄື

ຜູ້ກຳໜັດ ດີ້ນຮົນຕາມອຳນາດ ຣາຄະ
ຜູ້ຂັດເຄືອງ ດີ້ນຮົນຕາມອຳນາດ ໂທສະ
ຜູ້ຫຼົງ ດີ້ນຮົນຕາມອຳນາດ ໂມຫະ
ຜູ້ຢຶດຕິດ ດີ້ນຮົນຕາມອຳນາດ ມານະ
ຜູ້ຢຶດຖື ດີ້ນຮົນຕາມອຳນາດ ທິດຖິ

ຜູ້ຟຸ້ງຊ່ານ   ດີ້ນຣົນຕາມອຳນາດ ອຸດທັດຈະ
ຜູ້ລັງເລ ດີ້ນຣົນຕາມອຳນາດ ວິຈິກິດສາ
ຜູ້ຕົກຢູ່ໃນກຳລັງກິເລດ ດີ້ນຣົນຕາມອຳນາດ ອະນຸໄສ

ດີ້ນຣົນຍ້ອນລາບ  ຍ້ອນເສື່ອມລາບ  ຍ້ອນຍົດ ຍ້ອນເສື່ອມຍົດ ຍ້ອນສັນເສີນ ຍ້ອນນິນທາ ຍ້ອນສຸກ ຍ້ອນທຸກ

ດີ້ນຣົນຍ້ອນຊາດ ຍ້ອນຊະຣາ ຍ້ອນພະຍາທິ ຍ້ອນມໍຣະນະ ຍ້ອນໂສກະ ປະຣິເທວະ ທຸກຂະ ໂທມະນັດ ແລະ ອຸປາຍາດ

ດີ້ນຣົນຍ້ອນທຸກເນື່ອງຈາກການເກີດໃນນະຣົກ  ຍ້ອນທຸກເນື່ອງຈາກການເກີດໃນກຳເນີດເດຍຣັດສານ ຍ້ອນທຸກເນື່ອງຈາກການເກີດໃນເຜດວິໄສ ຍ້ອນທຸກເນື່ອງຈາກການເກີດໃນໂລກມະນຸດ ຍ້ອນທຸກເນື່ອງຈາກການຖືກຳເນີດໃນທ້ອງ ຍ້ອນທຸກເນື່ອງຈາກການຢູ່ໃນທ້ອງ ຍ້ອນທຸກເນື່ອງຈາກການເກີດຈາກທ້ອງ   ຍ້ອນທຸກທີ່ສືບເນື່ອງຈາກ ຜູ້ເກີດ ຍ້ອນທຸກຂອງຜູ້ເກີດທີ່ເນື່ອງຈາກຜູ້ອື່ນ ຍ້ອນທຸກທີ່ເກີດຈາກຄວາມພະຍາຍາມຂອງຕົນເອງ ຍ້ອນທຸກທີ່ເກີດຈາກຄວາມພະຍາຍາມຂອງຜູ້ອື່ນ ຍ້ອນທຸກທີ່ເກີດຄວາມທຸກກາຍທຸກໃຈ ຍ້ອນທຸກທີ່ເກີດຈາກສັງຂານ ຍ້ອນທຸກທີ່ເກີດຈາກຄວາມຜັນປ່ຽນ

ດີ້ນຣົນຍ້ອນທຸກທີ່ເກີດຈາກໂຣກທາງຕາ ຍ້ອນທຸກທີ່ເກີດຈາກໂຣກທາງຫູ ຍ້ອນທຸກທີ່ເກີດຈາກໂຣກທາງດັງ ຍ້ອນທຸກທີ່ເກີດຈາກໂຣກທາງລີ້ນ ຍ້ອນທຸກທີ່ເກີດຈາກໂຣກທາງກາຍ ຍ້ອນທຸກທີ່ເກີດຈາກໂຣກຫົວ ฯລฯ ໂຣກຫູ ฯລฯ ໂຣກປາກ ฯລฯໂຣກແຂ້ວ ฯລฯ ໂຣກໄອ ฯລฯ ໂຣກຫືດ ฯລฯ ໄຂ້ຫວັດ ฯລฯ ໄຂ້ພິດ ฯລฯ ໄຂ້ເຊື່ອງຊຶມ ฯລฯ ໂຣກທ້ອງ ฯລฯ ເປັນລົມສະຫຼົບ ฯລฯ ລົງແດງ ฯລฯ ຈຸກສຽດ ฯລฯ ອະຫິວາຕົກໂຣກ ฯລฯ   ໂຣກຂີ້ທູດ ฯລฯ ຝີ ฯລฯ ກາກ ฯລฯ ມອງຄໍ່ ฯລฯ ລົມບ້າໝູ ฯລฯ ຫິດເປື່ອຍ ฯລฯ ຫິດດ້ານ ฯລฯ ຫິດ ฯລฯ ຫູດ ฯລฯ ໂຣກລະລອກ ฯລฯ ໂຣກະບິຊ່ານ ฯລฯ ໂຣກເບົາຫວານ ฯລฯ ໂຣກເຣີມ ฯລฯ ໂຣກພຸພອງ ฯລฯ ໂຣກຣິດສີດວງທະວານ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກບີ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກລົມ ฯລฯໄຂ້ສັນນິບາດ ฯລฯ ຄວາມເຈັບປ່ວຍທີ່ເກີດ ຈາກການປ່ຽນລະດູການ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ฯລฯ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ฯລฯ   ຄວາມໜາວ ฯລฯ ຄວາມຮ້ອນ ฯລฯ ຄວາມຫິວ ฯລฯ ຄວາມກະຫາຍ ฯລฯ ປວດອຸດຈາຣະ ฯລฯ ປວດປັດສາວະ ฯລฯ

ດີ້ນຣົນຍ້ອນທຸກທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ທຸກຍ້ອນມານດາຕາຍ ฯລฯ ທຸກຍ້ອນບິດາຕາຍ ฯລฯ ທຸກຍ້ອນອ້າຍນ້ອງຊາຍຕາຍ ฯລฯ ທຸກ

ຍ້ອນເອື້ອຍນ້ອງສາວຕາຍ ຯລຯ ທຸກຍ້ອນບຸດຕາຍ ຯລຯ ທຸກຍ້ອນທິດາຕາຍ ຯລຯ ຄວາມພິນາດຂອງຍາດພີ່ນ້ອງ ຯລຯ ໂພຄະຊັບພິນາດ ຯລຯ ຄວາມເສຍຫາຍທີ່ເກີດຈາກໂຣກ ຯລຯ ສີນວິບັດ ຯລຯ ທິດຖິວິບັດ

ຄໍາວ່າ ຍ້ອນເຫັນ ໄດ້ແກ່ ຍ້ອນເຫັນ ຄື ຍ້ອນແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງ ລວມຄວາມວ່າ ຍ້ອນເຫັນໝູ່ສັດຜູ້ດີ້ນຣົນຢູ່

ຄໍາວ່າ ເໝືອນຝູງປາໃນບວກທີ່ມີນໍ້າໜ້ອຍ ອະທິບາຍວ່າ ໝູ່ສັດດີ້ນຣົນ ຄື ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະສັບກະສ່າຍ ດ້ວຍຄວາມດີ້ນຣົນຍ້ອນຕັນຫາ ແລະ ອື່ນ ໆ ທິດຖິວິບັດ ເໝືອນຝູງປາຢູ່ໃນນໍ້າໜ້ອຍ ຄື ມີນໍ້າບໍ່ຫຼາຍ ນໍ້າແຫ້ງໄປຖືກກາ ນົກກະສາ ຫຼື ນົກຍາງຫຍຸມລາກຂຶ້ນມາກີນກິນ ກໍດີ້ນຣົນ ຄື ກະເສືອກກະສົນ ທຸຣົນທຸຣາຍ ຫວັ່ນໄຫວ ສັ່ນເຊນ ກະສັບກະສ່າຍຢູ່ສັນນັ້ນ ລວມຄວາມວ່າ ເໝືອນຝູງປາໃນບວກທີ່ມີນໍ້າໜ້ອຍ

ຄໍາວ່າ ສັດທີ່ທໍາຮ້າຍກັນແລະກັນ ອະທິບາຍວ່າ ສັດທັງຫຼາຍ ເມື່ອຖືກທໍາຮ້າຍ ທໍາຮ້າຍກັບ ເຄືອງ ເຄືອງຕອບ ປອງຮ້າຍ ປອງຮ້າຍຕອບກັນແລະກັນ ຄື ພຣະຣາຊາຊົງວິວາດກັບພຣະຣາຊາກໍໄດ້ ກະສັດວິວາດກັບກະສັດກໍໄດ້ ພາມວິວາດກັບພາມກໍໄດ້ ຄະຫະບໍດີວິວາດກັບຄະຫະບໍດີກໍໄດ້ ມານດາວິວາດກັບບຸດກໍໄດ້ ບຸດວິວາດກັບມານດາກໍໄດ້ ບິດາວິວາດກັບບຸດກໍໄດ້ ບຸດວິວາດກັບບິດາກໍໄດ້ ອ້າຍນ້ອງຊາຍວິວາດກັບອ້າຍນ້ອງຊາຍກໍໄດ້ ເອື້ອຍນ້ອງສາວວິວາດກັບເອື້ອຍນ້ອງສາວກໍໄດ້ ອ້າຍນ້ອງຊາຍວິວາດກັບເອື້ອຍນ້ອງສາວກໍໄດ້ ເອື້ອຍນ້ອງສາວວິວາດກັບອ້າຍນ້ອງຊາຍກໍໄດ້ ສະຫາຍວິວາດກັບສະຫາຍກໍໄດ້ ຊົນເຫຼົ່ານັ້ນເຖິງການຜິດຖຽງ ແກ່ງແຍ່ງ ແລະວິວາດກັນ ໃນການທໍາຮ້າຍກັນແລະກັນນັ້ນ ກໍທໍາຮ້າຍກັນແລະກັນ ດ້ວຍຝ່າມືແດ່ ດ້ວຍກ້ອນດິນແດ່ ດ້ວຍທ່ອນໄມ້ແດ່ ດ້ວຍອາວຸດແດ່ ຍ້ອນທໍາຮ້າຍກັນນັ້ນ ຊົນເຫຼົ່ານັ້ນກໍເຂົ້າເຖິງຄວາມຕາຍແດ່ ທຸກປາງຕາຍແດ່ ລວມຄວາມວ່າ ສັດທີ່ທໍາຮ້າຍກັນແລະກັນ

ຄໍາວ່າ ຍ້ອນເຫັນ ໃນຄໍາວ່າ ຍ້ອນເຫັນ ຯລຯ ໄພຈຶ່ງຜາກົດແກ່ເຮົາ ອະທິບາຍວ່າ ຍ້ອນເຫັນ ຄື ຍ້ອນແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງ ໄພ ຄື ຄວາມບີບຄັ້ນ ຄວາມກະທົບກະທັ່ງ ອັນຕະລາຍ ອຸປະສັກ ຈຶ່ງຜາກົດ ລວມຄວາມວ່າ ຍ້ອນເຫັນ ຯລຯໄພຈຶ່ງຜາກົດແກ່ເຮົາ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຍ້ອນເຫັນໝູ່ສັດຜູ້ດີ້ນຣົນຢູ່
ເໝືອນຝູງປາໃນບວກທີ່ມີນໍ້າໜ້ອຍ
ຍ້ອນເຫັນສັດທີ່ທໍາຮ້າຍກັນແລະກັນ
ໄພຈຶ່ງຜາກົດແກ່ເຮົາ

[໑໗໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ໂລກທັງໝົດບໍ່ມີແກ່ນສານ
ສັງຂານທັງຫຼາຍທຸກທິດກໍຫວັ່ນໄຫວ
ເຮົາເມື່ອຕ້ອງການພົບສໍາລັບຕົນ
ກໍເບິ່ງບໍ່ເຫັນຖານະອັນໃດທີ່ບໍ່ຖືກຄອບງໍາ

## ວ່າດ້ວຍໂລກ

ຄໍາວ່າ ໂລກທັງໝົດບໍ່ມີແກ່ນສານ ອະທິບາຍວ່າ ໂລກນະຮົກ ໂລກໃນກໍາເນີດເດຍຣັດສານ ໂລກໃນເຜດວິໄສ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ໂລກນີ້ ໂລກໜ້າ ພົມມະໂລກ ເທວະໂລກ ນີ້ຕັດຮຽກວ່າ ໂລກ ໂລກນະຮົກບໍ່ມີແກ່ນສານ ຄື ຂາດແກ່ນສານ ປາສະຈາກແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ຫຼື ໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທໍາມະດາ

ໂລກໃນກໍາເນີດເດຍຣັດສານ ຯລຯ ໂລກໃນເຜດວິໄສ ຯລຯ ມະນຸດໂລກ ຯລຯ ເທວະໂລກ ຯລຯ ຂັນທະໂລກ ຯລຯ ທາດໂລກ ຯລຯ ອາຍະຕະນະໂລກ ຯລຯ ໂລກນີ້ ຯລຯ ໂລກໜ້າ ຯລຯ ພົມມະໂລກ ຯລຯ ເທວະໂລກ ຯລຯ ບໍ່ມີແກ່ນສານ ຄື ຂາດແກ່ນສານ ປາສະຈາກແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນ ຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ຫຼືໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທໍາມະດາ

ໂລກໃນກໍາເນີດເດຍຣັດສານ ຯລຯ ໂລກໃນເຜດວິໄສ ຯລຯ ມະນຸດໂລກ ຯລຯ ເທວະໂລກ ຯລຯ ຂັນທະໂລກ ຯລຯ. ທາດໂລກ ຯລຯ ອາຍະຕະນະໂລກ ຯລຯ ໂລກນີ້ ຯລຯ ໂລກໜ້າ ຯລຯ ພົມມະໂລກ ຯລຯ ເທວະໂລກ ບໍ່ມີແກ່ນສານ ຄື ຂາດແກ່ນສານ ປາສະຈາກແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ຫຼື ໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທໍາມະດາ

ໄມ້ອໍ້ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ໄມ້ທຸ່ງສາ ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ໄມ້ໝາກເດື່ອ ຯລຯ ໄມ້ທອງຫຼາງ ຯລຯ ຕົ້ນຫງອນໄກ່ ຯລຯ ຟອງນໍ້າ ຯລຯ ຕ່ອມນໍ້າ ຯລຯ ພະຍັບແດດ ຯລຯ ຕົ້ນກ້ວຍ ຯລຯ ເງົາ ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ສັນໃດ

ໂລການະຮົກ ບໍ່ມີແກ່ນສານ ຄື ຂາດແກ່ນສານ ປາສະຈາກແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ຫຼືໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທຳມະດາ

ໂລກໃນກຳເນີດເດຍຣັດສານ ฯລฯ ໂລກໃນເຜດວິໄສ ฯລฯ ມະນຸດໂລກ ฯລฯ ເທວະໂລກ ບໍ່ມີແກ່ນສານ ຄື ປາສະຈາກແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ຫຼືໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທຳມະດາ ລວມຄວາມວ່າ ໂລກທັງໝົດບໍ່ມີແກ່ນສານ

## ວ່າດ້ວຍສັງຂານບໍ່ທ່ຽງ

ຄຳວ່າ ສັງຂານທັງຫຼາຍທຸກທິດກໍຫວັ່ນໄຫວ ອະທິບາຍວ່າ ສັງຂານທາງທິດຕາເວັນອອກຄອນແຄນ ຫວັ່ນໄຫວ ຄື ສະເທືອນ ສະທ້ານ ຍ້ອນເປັນທຳມະຊາດບໍ່ທ່ຽງ ຈຶ່ງຖືກຊາດຕິດຕາມຖືກຊະຣາແຜ່ຄຸມ ຖືກພະຍາທິຄອບງຳ ຖືກມໍຣະນະກຳຈັດ ຕັ້ງຢູ່ໃນກອງທຸກ ບໍ່ມີບ່ອນຕ້ານທານບໍ່ມີບ່ອນປົກປ້ອງ ບໍ່ມີບ່ອນເພິ່ງ ເປັນສິ່ງຫາບ່ອນເພິ່ງບໍ່ໄດ້

ສັງຂານທາງທິດຕາເວັນຕົກ ฯລฯ ສັງຂານທາງທິດເໜືອ ฯລฯ ສັງຂານທາງທິດໃຕ້ ฯລฯ ສັງ ຂານທາງທິດອາຄະເນ ฯລฯ ສັງຂານທາງທິດພາຍັບ ฯລฯ ສັງຂານທາງທິດອີສານ ฯລฯ ສັງຂານທາງທິດທໍຣະດີ ฯລฯ ສັງຂານທາງທິດເບື້ອງຕ່ຳ ฯລฯ ສັງຂານທາງທິດເບື້ອງສູງ ฯລฯ ສັງຂານໃນທັງ ໑໐ ທິດ ກໍຄອນແຄນ ຫວັ່ນໄຫວ ຄື ສະເທືອນ ສະທ້ານ ຍ້ອນເປັນທຳມະຊາດບໍ່ທ່ຽງ ຈຶ່ງຖືກຊາດຕິດຕາມ ຖືກຊະຣາແຜ່ຄຸມ ຖືກພະຍາທິຄອບງຳ ຖືກມໍຣະນະກຳຈັດ ຕັ້ງຢູ່ໃນກອງທຸກ ບໍ່ມີບ່ອນຕ້ານທານ ບໍ່ມີບ່ອນປົກປ້ອງ ບໍ່ມີບ່ອນເພິ່ງ ເປັນສິ່ງຫາບ່ອນເພິ່ງບໍ່ໄດ້ ສົມຈິງດັ່ງພາສິດນີ້ວ່າ

ເຖິງວິມານນີ້ ສະຫວ່າງຮຸ່ງເຮືອງ ຢູ່ໃນທິດອຸດອນກໍຈິງ
ແຕ່ບັນດິດກໍຍັງແນມເຫັນໂທດໃນຮູບ ແລ້ວຫວັ່ນໄຫວທຸກເມື່ອ
ສະນັ້ນ ຜູ້ມີປັນຍາ ຈຶ່ງບໍ່ຍິນດີໃນຮູບເລີຍ
ໂລກຖືກມໍຣະນະກຳຈັດ ຖືກຊະຣາຫ້ອມລ້ອມ ຖືກລູກສອນ
ຄືຕັນຫາແທງ ໄໝ້ຮ້ອນເປັນຄວັນຍ້ອນຄວາມປາຖະໜາຢູ່ທຸກເມື່ອ
ໂລກທັງປວງຖືກໄຟໄໝ້ ລຸກສະຫວ່າງແຈ້ງ ໂຊດຊ່ວງ ຫວັ່ນໄຫວແລ້ວ

ລວມຄວາມວ່າ ສັງຂານທັງຫຼາຍທຸກທິດກໍຫວັ່ນໄຫວ

ຄຳວ່າ ເຮົາເມື່ອຕ້ອງການພົບສຳລັບຕົນ ອະທິບາຍວ່າ ເມື່ອຕ້ອງການ ຄື ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງພົບ ຄື ບ່ອນຕ້ານທານ ບ່ອນປົກປ້ອງ ບ່ອນເພິ່ງ ບ່ອນດຳເນີນໄປ ບ່ອນໄປສູ່ຈຸດໝາຍສຳລັບຕົນ ລວມຄວາມວ່າ ເຮົາເມື່ອຕ້ອງການພົບສຳລັບຕົນ

ຄຳວ່າ ກໍເບິ່ງບໍ່ເຫັນຖານະອັນໃດທີ່ບໍ່ຖືກຄອບງຳ ອະທິບາຍວ່າ ເບິ່ງເຫັນແຕ່ຖານະທີ່ຖືກຄອບງຳເທົ່ານັ້ນ ໄດ້ເຫັນແຕ່ຖານະທີ່ຖືກຄອບງຳ ຄື ຄວາມເປັນໜຸ່ມສາວທັງປວງ ຖືກຊະຣາຄອບງຳ ຄວາມບໍ່ມີໂຣກທັງປວງຖືກພະຍາທິຄອບງຳ ຊີວິດທັງປວງຖືກມໍຣະນະຄອບງຳ ລາບທັງປວງຖືກຄວາມເສື່ອມລາບຄອບງຳ ຍົດທັງປວງຖືກຄວາມເສື່ອມຍົດຄອບງຳ ຄວາມສັນເສີນທັງປວງຖືກການນິນທາຄອບງຳ ຄວາມສຸກທັງປວງຖືກຄວາມທຸກຄອບງຳ

ມີລາບເສື່ອມລາບ ມີຍົດເສື່ອມຍົດ ນິນທາ ສັນເສີນ ສຸກ
ແລະ ທຸກ ທຳເຫຼົ່ານີ້ ໃນໝູ່ມະນຸດລ້ວນບໍ່ທ່ຽງ ບໍ່ໝັ້ນຄົງ
ມີຄວາມຜັນປ່ຽນໄປເປັນທຳມະດາ

ລວມຄວາມວ່າ ກໍເບິ່ງບໍ່ເຫັນຖານະອັນໃດທີ່ບໍ່ຖືກຄອບງຳ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ

ໂລກທັງໝົດບໍ່ມີແກ່ນສານ
ສັງຂານທັງຫຼາຍທຸກທິດກໍຫວັ່ນໄຫວ
ເຮົາເມື່ອຕ້ອງການພົບສຳລັບຕົນ
ກໍເບິ່ງບໍ່ເຫັນຖານະອັນໃດທີ່ບໍ່ຖືກຄອບງຳ

[໑໗໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຍ້ອນເຫັນສັດມີບ່ອນສິ້ນສຸດແລະຖືກສະກັດກັ້ນ
ຄວາມບໍ່ຍິນດີຈຶ່ງມີແກ່ເຮົາ
ອັນໜຶ່ງ ເຮົາໄດ້ເຫັນລູກສອນທີ່ເຫັນໄດ້ຍາກ
ອັນອາໄສຫົວໃຈໃນສັດເຫຼົ່ານີ້ແລ້ວ

ຄຳວ່າ ມີບ່ອນສິ້ນສຸດ ໃນຄຳວ່າ ສັດມີບ່ອນສິ້ນສຸດແລະຖືກສະກັດກັ້ນ ອະທິບາຍວ່າ ຊະຣາເຮັດໃຫ້ຄວາມເປັນໜຸ່ມສາວທັງປວງໝົດສິ້ນໄປ ພະຍາທິເຮັດໃຫ້ຄວາມບໍ່ມີໂຣກທັງປວງໝົດສິ້ນໄປ ມໍຣະນະເຮັດໃຫ້ຊີວິດທັງປວງໝົດສິ້ນໄປ ຄວາມເສື່ອມລາບເຮັດໃຫ້ລາບທັງປວງໝົດສິ້ນໄປ ຄວາມເສື່ອມຍົດເຮັດໃຫ້ຍົດທັງປວງໝົດສິ້ນໄປ ການນິນທາເຮັດໃຫ້ຄວາມສັນເສີນທັງປວງໝົດສິ້ນໄປ ຄວາມທຸກເຮັດໃຫ້ຄວາມສຸກທັງປວງໝົດສິ້ນໄປ ລວມຄວາມວ່າ ມີບ່ອນສິ້ນສຸດ

ຄຳວ່າ ແລະຖືກສະກັດກັ້ນ ອະທິບາຍວ່າ ສັດທັງຫຼາຍຜູ້ປາຖະໜາຄວາມເປັນໜຸ່ມສາວ ຖືກຊະຣາຂັດຂວາງ ຜູ້ຕ້ອງການຄວາມບໍ່ມີໂຣກຖືກພະຍາທິຂັດຂວາງ ຜູ້ປາຖະໜາເພື່ອມີຊີວິດຢູ່ ຖືກມໍຣະນະຂັດຂວາງ ຜູ້ປາຖະໜາລາບຖືກຄວາມເສື່ອມລາບຂັດຂວາງ ຜູ້ປາຖະໜາຍົດຖືກ ຄວາມເສື່ອມຍົດຂັດຂວາງ ຜູ້ປາຖະໜາຄວາມສັນເສີນຖືກການນິນທາຂັດຂວາງ ຜູ້ປາຖະໜາ ຄວາມສຸກຖືກຄວາມທຸກສະກັດກັ້ນ ຄື ຂັດຂວາງ ກະທົບ ກະທົບກະທັ່ງ ທຳລາຍລ້າງຜານ ລວມຄວາມວ່າ ສັດມີບ່ອນສິ້ນສຸດແລະຖືກສະກັດກັ້ນ

ຄຳວ່າ ຍ້ອນເຫັນ ໃນຄຳວ່າ ຍ້ອນເຫັນ ຯລຯ ຄວາມບໍ່ຍິນດີຈຶ່ງມີແກ່ເຮົາ ໄດ້ແກ່ ຍ້ອນ ເຫັນ ຄື ຍ້ອນແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ແຈ່ມແຈ້ງ ລວມຄວາມ ວ່າ ຍ້ອນເຫັນ

ຄຳວ່າ ຄວາມບໍ່ຍິນດີຈຶ່ງມີແກ່ເຮົາ ໄດ້ແກ່ ຄວາມບໍ່ຍິນດີ ຄື ຄວາມບໍ່ໃຍດີ ຄວາມຣະອາ ຄວາມເບື່ອ ຄວາມໜ່າຍ ໄດ້ມີແລ້ວ ລວມຄວາມວ່າ ຍ້ອນເຫັນ ຯລຯ ຄວາມບໍ່ຍິນດີຈຶ່ງມີ ແກ່ເຮົາ

ຄຳວ່າ ອັນໜຶ່ງ ໃນຄຳວ່າ ອັນໜຶ່ງ ເຮົາໄດ້ເຫັນລູກສອນ ຯລຯ ໃນສັດທັງຫຼາຍເຫຼົ່ານີ້ ແລ້ວ ເປັນຄຳເຊື່ອມບົດ ຯລຯ ຄຳວ່າ ອັນໜຶ່ງ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ໃນ ຯລຯ ເຫຼົ່ານີ້ ໄດ້ແກ່ ໃນສັດທັງຫຼາຍ

ຄຳວ່າ ລູກສອນ ໄດ້ແກ່ ລູກສອນ ໗ ຊະນິດ ຄື

໑. ລູກສອນ ຄື ຣາຄະ
໒. ລູກສອນ ຄື ໂທສະ
໓. ລູກສອນ ຄື ໂມຫະ
໔. ລູກສອນ ຄື ມານະ
໕. ລູກສອນ ຄື ທິດຖິ
໖. ລູກສອນ ຄື ໂສກະ
໗. ລູກສອນ ຄື ຄວາມສົງໄສ

ຄຳວ່າ ໄດ້ເຫັນ ໄດ້ແກ່ ໄດ້ເຫັນ ຄື ໄດ້ແນມເຫັນ ໄດ້ແທງຕະຫຼອດ ລວມຄວາມວ່າ ອັນໜຶ່ງ ເຮົາໄດ້ເຫັນລູກສອນ ຯລຯ ໃນສັດທັງຫຼາຍເຫຼົ່ານີ້ແລ້ວ

ຄຳວ່າ ທີ່ເຫັນໄດ້ຍາກ ໃນຄຳວ່າ ທີ່ເຫັນໄດ້ຍາກອັນອາໄສຫົວໃຈ ໄດ້ແກ່ເຫັນໄດ້ຍາກ ຄື ເບິ່ງເຫັນໄດ້ຍາກ ແນມເຫັນໄດ້ຍາກ ຮູ້ໄດ້ຍາກ ຕາມຮູ້ໄດ້ຍາກ ແທງຕະຫຼອດໄດ້ຍາກ ລວມ ຄວາມວ່າ ທີ່ເຫັນໄດ້ຍາກ

ຄຳວ່າ ອັນອາໄສຫົວໃຈ ອະທິບາຍວ່າ ຈິດຕັດຮຽກວ່າ ຫົວໃຈ ໄດ້ແກ່ ຈິດ ມະໂນ ມານັດ ຫົວໃຈ ປັນຖະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນ ຍານທາດທີ່ເກີດຈາກວິນຍານຂັນນັ້ນ

ຄຳວ່າ ອັນອາໄສຫົວໃຈ ອະທິບາຍວ່າ ອັນອາໄສຫົວໃຈ ຄື ອັນອາໄສຈິດ ອາໄສຢູ່ ໃນຈິດ ໄປຮ່ວມກັນ ເກີດຮ່ວມກັນ ກ່ຽວຂ້ອງກັນ ປະກອບຮ່ວມກັນ ເກີດພ້ອມກັນ ດັບພ້ອມກັນ ມີວັດຖຸດຽວກັນ ມີອາລົມດຽວກັບຈິດ ລວມຄວາມວ່າ ທີ່ເຫັນໄດ້ຍາກ ອັນອາໄສຫົວໃຈ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຍ້ອນເຫັນສັດມີບ່ອນສິ້ນສຸດ ແລະ ຖືກສະກັດກັ້ນ
ຄວາມບໍ່ຍິນດີຈຶ່ງມີແກ່ເຮົາ
ອັນໜຶ່ງ ເຮົາໄດ້ເຫັນລູກສອນ ທີ່ເຫັນໄດ້ຍາກ
ອັນອາໄສຫົວໃຈໃນສັດເຫຼົ່ານີ້ແລ້ວ

[໑໗໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ສັດຖືກລູກສອນໃດປັກຕິດແລ້ວ ແລ່ນຜ່ານໄປທຸກທິດທາງ
ຍ້ອນຖອນລູກສອນນັ້ນໄດ້ແລ້ວ ຈຶ່ງບໍ່ຕ້ອງແລ່ນຜ່ານ ບໍ່ຕ້ອງຫຼົ່ມຈົມ

## ວ່າດ້ວຍລູກສອນ ໗ ຊະນິດ

ຄຳວ່າ ສັດຖືກລູກສອນໃດປັກຕິດແລ້ວ ແລ່ນຜ່ານໄປທຸກທິດທາງ ອະທິບາຍວ່າ
ຄຳວ່າ ລູກສອນ ໄດ້ແກ່ ລູກສອນ ໗ ຊະນິດ ຄື

໑. ລູກສອນ ຄື ຣາຄະ
໒. ລູກສອນ ຄື ໂທສະ
໓. ລູກສອນ ຄື ໂມຫະ
໔. ລູກສອນ ຄື ມານະ
໕. ລູກສອນ ຄື ທິດຖິ
໖. ລູກສອນ ຄື ໂສກະ
໗. ລູກສອນ ຄື ຄວາມສົງໄສ

ລູກສອນ ຄື ຣາຄະ ເປັນແນວໃດ?

ຄື ຄວາມກຳໜັດ ຄວາມກຳໜັດແຮງ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມເພີດເພີນ ຄວາມກຳໜັດດ້ວຍຄວາມເພີດເພີນ ຄວາມກຳໜັດແຮງແຫ່ງຈິດ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ ນີ້ຊື່ວ່າ ລູກສອນ ຄື ຣາຄະ

ລູກສອນ ຄື ໂທສະ ເປັນແນວໃດ?

ຄື ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ຯລຯ ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ຯລຯ ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ຯລຯ ຄວາມດຸຮ້າຍ ຄວາມໃຊ້ນ້ຳຕາ (ຄວາມຍ້ອນວາຈາຊົ່ວ) ຄວາມບໍ່ເບີກບານແຫ່ງຈິດ ນີ້ຊື່ວ່າລູກສອນຄືໂທສະ

ລູກສອນ ຄື ໂມຫະ ເປັນແນວໃດ?

ຄື ຄວາມບໍ່ຮູ້ໃນທຸກ ໗ລ໗ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນເບື້ອງຕົ້ນ ຄວາມບໍ່ຮູ້ໃນສ່ວນເບື້ອງປາຍ ຄວາມບໍ່ຮູ້ທັງໃນສ່ວນເບື້ອງຕົ້ນ ແລະສ່ວນເບື້ອງປາຍ ຄວາມບໍ່ຮູ້ໃນທຳທັງຫຼາຍທີ່ອາໄສກັນເກີດຂຶ້ນ ຄື ຄວາມທີ່ປະຕິດຈະສະມຸບບາດມີອະວິດຊານີ້ເປັນປັດໄຈ ຄວາມບໍ່ເຫັນ ບໍ່ຕັດສະຮູ້ ບໍ່ຕັດສະຮູ້ຕາມ ບໍ່ຕັດສະຮູ້ຊອບ ບໍ່ແທງຕະຫຼອດ ບໍ່ຖືເຫດດ້ວຍດີ ບໍ່ຢັ່ງລົງເຖິງເຫດ ບໍ່ເພ່ງພິນິດ ບໍ່ພິຈາລະນາ ບໍ່ເຮັດໃຫ້ປະຈັກ ບໍ່ຜ່ອງແຜ້ວ ຄວາມເປັນຄົນໂງ່ ຄວາມຫຼົງ ລຸ້ມຫຼົງ ຫຼົງໃຫຼ ອະວິດຊາ ໂອຄະ ຄື ອະວິດຊາໂຍຄະ ຄື ອະວິດຊາ ອະນຸໄສ ຄື ອະວິດຊາ ປະຣິຍຸດຖານ ຄື ອະວິດຊາ ຫຼິ້ມ ຄື ອະວິດຊາ ອະກຸສົນ ມູນ ຄື ໂມຫະເຫັນປານນີ້ ນີ້ຊື່ວ່າລູກສອນ ຄື ໂມຫະ

ລູກສອນ ຄື ມານະ ເປັນແນວໃດ?

ຄື ຄວາມຖືຕົວວ່າເຮົາເລີດກວ່າເຂົາ ຄວາມຖືຕົວວ່າເຮົາສະເໝີເຂົາ ຄວາມຖືຕົວວ່າເຮົາດ້ອຍກວ່າເຂົາ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນ ເໝືອນທຸງເຫັນປານນີ້ ນີ້ຊື່ວ່າລູກສອນ ຄື ມານະ

ລູກສອນ ຄື ທິດຖິ ເປັນແນວໃດ?

ຄື ສັກກາຍະທິດຖິມີວັດຖຸ[១] ໒໐ ມິດສາທິດຖິມີວັດຖຸ[២] ໑໐ ອັນຕະຄາຫິກະທິດຖິມີວັດຖຸ[៣] ໑໐ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບ ຄື ທິດຖິ ຄວາມກັນດານ ຄື ທິດຖິ ສັງນ ໜາມ ຄື ທິດຖິ ຄວາມດີ້ນຮົນ ຄື ທິດຖິ ເຄື່ອງຜູກພັນ ຄື ທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຍຶດໝັ້ນ ຄວາມຍຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖືຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິປະລາດ ຄວາມຖືຜິດ ຄວາມຖືໃນສິ່ງທີ່ບໍ່ເປັນຄວາມຈິງວ່າເປັນຈິງເຫັນປານນີ້ຈົນເຖິງທິດຖິ ໖໘ ນີ້ຊື່ວ່າລູກສອນ ຄື ທິດຖິ

ລູກສອນ ຄື ໂສກະ ເປັນແນວໃດ?

ຄື ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມເສົ້າໂສກພາຍໃນ ຄວາມເສົ້າໂສກຫຼາຍພາຍໃນ ຄວາມຮ້ອນຮົນພາຍໃນ ຄວາມຮ້ອນຮົນຫຼາຍພາຍໃນ ຄວາມມືກໄໝ້ແຫ່ງຈິດ ຄວາມທຸກໃຈ ຂອງຜູ້ຖືກຄວາມເສຍຫາຍຂອງຍາດພີ່ນ້ອງກະທົບແດ່ ຖືກຄວາມເສຍຫາຍແຫ່ງໂພຄະຊັບກະທົບແດ່ ຖືກຄວາມເສຍຫາຍແຫ່ງໂຣກກະທົບແດ່ ຖືກສີນວິບັດກະທົບແດ່ ຖືກທິດຖິວິບັດກະທົບແດ່ ປະສົບ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວແລ້ວແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່ ນີ້ຊື່ວ່າລູກສອນ ຄື ໂສກະ

ລູກສອນ ຄື ຄວາມສົງໄສ ເປັນແນວໃດ?

ຄື ຄວາມສົງໄສໃນທຸກ ຄວາມສົງໄສໃນເຫດເກີດແຫ່ງທຸກ ຄວາມສົງໄສໃນຄວາມ ດັບທຸກ ຄວາມສົງໄສໃນປະຕິປະທາເຄື່ອງດຳເນີນໄປສູ່ຄວາມດັບທຸກ ຄວາມສົງໄສໃນສ່ວນເບື້ອງຕົ້ນ ຄວາມສົງໄສໃນສ່ວນເບື້ອງປາຍ ຄວາມສົງໄສທັງໃນສ່ວນເບື້ອງຕົ້ນແລະສ່ວນເບື້ອງປາຍ ຄວາມສົງໄສໃນທຳທີ່ອາໄສກັນເກີດຂຶ້ນ ຄື ຄວາມທີ່ປະຕິດຈະສະມຸບບາດມີອະວິດຊານີ້ເປັນປັດໄຈ ຄວາມສົງໄສ ກິຣິຍາທີ່ສົງໄສ ພາວະທີ່ສົງໄສ ຄວາມເຄືອບແຄງ ຄວາມລັງເລ ຄວາມເຫັນເປັນ ໘ ຝ່າຍ ໘ ທາງ ຄວາມບໍ່ແນ່ໃຈ ຄວາມຍຶດຖືຫຼາຍຢ່າງ ຄວາມບໍ່ຕົກລົງໃຈ ຄວາມຕັດສິນໃຈບໍ່ໄດ້ ຄວາມກຳນົດຖືບໍ່ໄດ້ ຄວາມຫວາດຫວັ່ນແຫ່ງຈິດ ຄວາມຕິດຂັດໃນໃຈເຫັນປານນີ້ ນີ້ຊື່ວ່າລູກສອນຄືຄວາມສົງໄສ

## ວ່າດ້ວຍພາວະຂອງສັດທີ່ຖືກລູກສອນແທງ

ຄຳວ່າ ສັດຖືກລູກສອນໃດປັກຕິດແລ້ວ ແລ່ນຜ່ານໄປທຸກທິດທາງ ອະທິບາຍວ່າ ສັດຖືກລູກສອນຄືຣາຄະປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍປະພຶດທຸດຈະຣິດທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຂ້າສັດແດ່ ລັກຊັບແດ່ ຕັດປ່ອງຢ່ອງເບົາແດ່ ລັກຍົກເຄົ້າແດ່ ປຸ້ນບ້ານແດ່ ດັກຈີ້ໃນທາງປ່ຽວແດ່ ລະເມີດພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ສັດຖືກລູກສອນຄືຣາຄະປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນຄາຄ້າງຢູ່ ກໍແລ່ນໄປ ແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປ ແນວນີ້ແດ່

ອີກໄນໜຶ່ງ ສັດຖືກລູກສອນ ຄື ຣາຄະປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດ ແໜ້ນຄາຄ້າງຢູ່ ເມື່ອຈະສະແຫວງຫາໂພຄະຊັບ ກໍແລ່ນເຮືອອອກໄປສູ່ມະຫາສະມຸດ ຜ່າໜາວ ຜ່າຮ້ອນ ຖືກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານບຽດບຽນເອົາແດ່ ຖືກຄວາມຫິວກະຫາຍກົດດັນຢູ່ ກໍຕ້ອງເດີນທາງໄປ ຄຸມພະຣັດ ຕັກໂກລະຣັດ ຕັກກະສິລະຣັດ ກາລະມຸຂະຣັດ ປຸຣະຣັດ ເວສຸງຄະຣັດ ເວຣາປະຖະຣັດ ຊະວາຣັດ ຕາມະລິຣັດ ວັງຄະຣັດ ເອລະພັນທະນະຣັດ ສຸວັນນະກູຕະຣັດ ສຸວັນນະພູມິຣັດ ຕັມພະປານິຣັດ ສຸບປາທະກະຣັດ ເພຣຸກັດສະຣັດ ສຸຣັດຖະຣັດ ພັງຄະໂລກະຣັດ ພັງຄະນະຣັດ ປະຣະມະພັງຄະນະຣັດ ໂຍນະຣັດ ປິນະຣັດ ວິນະກະຣັດ ມູລະປະທະຣັດ ເດີນທາງໄປສູ່ທະເລຊາຍທີ່ຕ້ອງໝາຍ ດ້ວຍດາວ ຄານໄປດ້ວຍເຂົ່າເດີນທາງດ້ວຍແບ້ ເດີນທາງດ້ວຍແກະ ໄປດ້ວຍການຕອກຫຼັກຜູກເຊືອກໂຫນໄປ ໄປດ້ວຍຣົ່ມເດີນທາງດ້ວຍການຕັດໄມ້ໄຜ່ເຮັດພະອົງສຳລັບປີນ ເດີນທາງຢ່າງນົກ ເດີນທາງຢ່າງໜູ ໄປຕາມຮ່ອມພູ ໄຕ່ໄປຕາມເຄືອຫວາຍ ເມື່ອສະແຫວງຫາບໍ່ໄດ້ກໍຕ້ອງສະເຫວີຍທຸກແລະ ໂທມະນັດທີ່ມີການບໍ່ໄດ້ເປັນຕົ້ນເຫດ ເຂົາເມື່ອສະແຫວງຫາໄດ້ມາ ແລະເມື່ອໄດ້ແລ້ວ ກໍຍັງຕ້ອງສະເຫວີຍທຸກແລະໂທມະນັດທີ່ມີການຕ້ອງຮັກສາເປັນມູນເຫດດ້ວຍຄວາມຫວາດຫວັ່ນວ່າ ແນວໃດນໍ ພຣະຣາຊາຈະບໍ່ເພິ່ງຍຶດໂພຄະຊັບຂອງເຮົາ ໂຈນຈະບໍ່ເພິ່ງປຸ້ນ ໄຟຈະບໍ່ເພິ່ງ ໄໝ້ ນ້ຳຈະບໍ່ເພິ່ງພັດພາ

ໄປ ທາຍາດທີ່ບໍ່ເປັນທີ່ຮັກຈະບໍ່ເພິ່ງລັກເອົາໄປ ເມື່ອຮັກສາຄຸ້ມຄອງຢູ່ແນວນີ້ ໂພຄະຊັບ ຍ່ອມເສື່ອມຄ່າລົງ ເຂົາກໍຕ້ອງສະເຫວີຍທຸກແລະໂທມະນັດ ທີ່ມີຄວາມພັດພາກເປັນມູນ ສັດຖືກລູກສອນຄືຣາຄະປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍແລ່ນໄປ ແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປ ແນວນີ້ແດ່

ສັດຖືກລູກສອນຄືໂທສະ ຯລຯ ລູກສອນ ຄື ໂມຫະ ຯລຯ ລູກສອນຄືມານະປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍປະພຶດທຸດຈະຣິດທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຂ້າສັດແດ່ ລັກຊັບແດ່ ຕັດປ່ອງຍ່ອງເບົາແດ່ ລັກຍົກເຄົ້າແດ່ ປຸ້ນເຮືອນແດ່ ດັກຈີ້ໃນທາງປ່ຽວແດ່ ລະເມີດພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະ ສັດຖືກລູກສອນຄືມານະປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍແລ່ນໄປແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປ ແນວນີ້ແດ່

ສັດຖືກລູກສອນຄືທິດຖິປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍປະພຶດເປືອຍກາຍ ບໍ່ມີມາຣະຍາດ ເລຍມື ເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປ ເຂົາເຊີນໃຫ້ຢຸດຮັບອາຫານກໍບໍ່ຢຸດຮັບອາຫານ ບໍ່ຮັບອາຫານທີ່ເຂົາແບ່ງໄວ້ ບໍ່ຮັບອາຫານທີ່ເຂົາເຮັດ ເຈາະຈົງ ບໍ່ຍິນດີອາຫານທີ່ເຂົາເຊີນ ບໍ່ຮັບອາຫານຈາກປາກໝໍ້ ບໍ່ຮັບອາຫານຈາກປາກ ພາຊະນະ ບໍ່ຮັບອາຫານກວມທໍຣະນີປະຕູ ບໍ່ຮັບອາຫານກວມທ່ອນໄມ້ ບໍ່ຮັບອາຫານກວມສາກ ບໍ່ຮັບອາຫານຂອງຄົນ ໒ ຄົນທີ່ກໍາລັງບໍຣິໂພກ ບໍ່ຮັບອາຫານຂອງແມ່ຍິງຖືພາ ບໍ່ຮັບອາຫານຂອງແມ່ຍິງຜູ້ກໍາລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານຂອງແມ່ຍິງທີ່ກ້ຽວພາຊາຍ ບໍ່ຮັບອາຫານທີ່ນັດແນະກັນເຮັດໄວ້ ບໍ່ຮັບອາຫານໃນບ່ອນລ້ຽງໝາ ບໍ່ຮັບອາຫານໃນບ່ອນມີແມງວັນໄຕ່ຕອມຢູ່ເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ  ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມຢາດອງ ຮັບອາຫານໃນເຮືອນຫຼັງດຽວ ຍັງຊີບດ້ວຍເຂົ້າຄໍາດຽວ ຮັບອາຫານໃນເຮືອນ ໒ ຫຼັງ ຍັງຊີບດ້ວຍເຂົ້າ ໒ ຄໍາ ຯລຯ ຮັບອາຫານໃນເຮືອນ ໗ ຫຼັງ ຍັງຊີບດ້ວຍເຂົ້າ ໗ ຄໍາ ຍັງຊີບດ້ວຍອາຫານໃນຖາດນ້ອຍ ໑ ໃບ ຍັງຊີບດ້ວຍອາຫານໃນຖາດນ້ອຍ ໒ ໃບ ຍັງຊີບດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ຄ້າງຄືນ ໑ ວັນ ຯລຯ  ກິນອາຫານທີ່ເກັບໄວ້ ຄ້າງຄືນ ໗ ວັນ  ຖືການບໍຣິໂພກອາຫານ ໑໕ ວັນຕໍ່ ໑ ຄາບ ສັດຖືກລູກສອນຄືທິດຖິ ປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍແລ່ນໄປແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປ ແນວນີ້ແດ່

ອີກໄນໜຶ່ງ ສັດຖືກລູກສອນຄືທິດຖິປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍກິນສົ້ມຜັກເປັນອາຫານ ກິນເຂົ້າຟ່າງເປັນອາຫານ ກິນໝາກເດືອຍເປັນອາຫານ ກິນກາກເຂົ້າເປັນອາຫານ ກິນສາຫຣ່າຍເປັນອາຫານ ກິນຣໍາເປັນອາຫານ ກິນເຂົ້າກົ້ນໝໍ້ເປັນອາຫານ ກິນກໍາຍານເປັນອາຫານ ກິນງາເປັນອາຫານ ກິນຫຍ້າເປັນອາຫານ ກິນມູນງົວ ເປັນອາຫານ ກິນເຫງົ້າ ແລະໝາກໄມ້ໃນປ່າເປັນອາຫານ ບໍຣິໂພກໝາກໄມ້ຫຼົ່ນຍັງຊີບ ເຂົານຸ່ງຫົ່ມ

ຜ້າປ່ານ ນຸ່ງຫົ່ມຜ້າແກມກັນ ນຸ່ງຫົ່ມຜ້າຫໍ່ສົບ ນຸ່ງຫົ່ມຜ້າບັງສຸກຸນ ນຸ່ງຫົ່ມຜ້າເປືອກໄມ້ ນຸ່ງຫົ່ມໜັງເສືອ ນຸ່ງຫົ່ມໜັງເສືອມີເລັບ ນຸ່ງຫົ່ມຜ້າຄາກອງ ນຸ່ງຫົ່ມຜ້າເປືອກປໍກອງ ນຸ່ງຫົ່ມຜ້າໝາກໄມ້ກອງ ນຸ່ງຫົ່ມຜ້າກໍາພົນຜົມມະນຸດ ນຸ່ງຫົ່ມຜ້າກໍາພົນຂົນປີກນົກເຄົ້າ ແຖຜົມ ແລະ ໜວດ ຄື ຖືການແຖຜົມ ແລະ ໜວດ ຢືນຢ່າງດຽວ ບໍ່ຍອມນັ່ງ ຍ່າງແຍ່ງແຍ້ ຄື ຖືການຍ່າງແຍ່ງແຍ້ນອນເທິງໜາມ ສໍາເລັດການນອນເທິງໜາມ ນອນເທິງແຜ່ນແປ້ນ ນອນເທິງເນີນດິນ ນອນຕະແຄງຂ້າງດຽວ ເອົາຝຸ່ນທູຕົວ ຢູ່ກາງແຈ້ງ ນັ່ງເທິງອາສະນະຕາມທີ່ປູໄວ້ ບໍຣິໂພກຄູດ ຄື ຖືການບໍຣິໂພກຄູດ ບໍ່ດື່ມນໍ້າເຢັນ ຄື ຖືການບໍ່ດື່ມນໍ້າເຢັນ ອາບນໍ້າວັນລະ ໓ ຄັ້ງ ຄື ຖືການລົງອາບນໍ້າ ຖືການເຮັດໃຫ້ກາຍເດືອດຮ້ອນ ຮ້ອນຮົນຫຼາກຫຼາຍຊະນິດ ເຫັນປານນີ້ ດ້ວຍປະການແນວນີ້ແດ່ ສັດຜູ້ຖືກລູກສອນ ຄື ທິດຖິປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍແລ່ນໄປ ແລ່ນພ່ານ ຄື ລົນລານ ທ່ອງທ່ຽວໄປ ແນວນີ້ແດ່

ສັດຜູ້ຖືກລູກສອນ ຄື ໂສກະປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍຍ່ອມໂສກ ເໜື່ອຍໜ່າຍ ຄໍ່າຄວນ ຕີເອິກພໍ່າເພີ້ ເຖິງຄວາມຫຼົງໃຫຼ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພາມ ເລື້ອງເຄີຍມີມາແລ້ວ ໃນເມືອງສາວັດຖີນີ້ເອງ ມານດາຂອງແມ່ຍິງບາງຄົນຕາຍ ແມ່ຍິງນັ້ນ ຍ້ອນມານດາຕາຍ ຈຶ່ງເປັນບ້າ ມີໃຈຟຸ້ງຊ່ານ ຈາກຖະໜົນນີ້ເຂົ້າໄປສູ່ຖະໜົນນັ້ນ ຈາກຮ່ອມນີ້ເຂົ້າໄປສູ່ຮ່ອມນັ້ນ ເວົ້າແນວນີ້ວ່າ ພວກທ່ານເຫັນມານດາຂອງເຮົາແດ່ບໍ່ ພວກທ່ານເຫັນມານດາຂອງເຮົາແດ່ບໍ່

ພາມ ເລື້ອງເຄີຍມີມາແລ້ວ ໃນເມືອງສາວັດຖີນີ້ເອງ ບິດາຂອງແມ່ຍິງບາງຄົນຕາຍແລ້ວ ຯລຯ ອ້າຍນ້ອງຊາຍຕາຍແລ້ວ ຯລຯ ເອື້ອຍນ້ອງສາວຕາຍແລ້ວ ຯລຯ ບຸດຕາຍແລ້ວ ຯລຯ ທິດາຕາຍແລ້ວ ຯລຯ ສາມີຕາຍແລ້ວ ແມ່ຍິງນັ້ນ ຍ້ອນສາມີນັ້ນຕາຍແລ້ວ ຈຶ່ງເປັນບ້າ ມີໃຈຟຸ້ງຊ່ານ ຈາກຖະໜົນນີ້ເຂົ້າໄປສູ່ຖະໜົນນັ້ນ ຈາກຮ່ອມນີ້ເຂົ້າໄປສູ່ຮ່ອມນັ້ນ ເວົ້າແນວນີ້ວ່າ ພວກທ່ານເຫັນສາມີຂອງເຮົາແດ່ບໍ່ ພວກທ່ານເຫັນຜົວຂອງເຮົາແດ່ບໍ່

ພາມ ເລື້ອງເຄີຍມີມາແລ້ວ ໃນເມືອງສາວັດຖີນີ້ເອງ ມານດາຂອງຊາຍບາງຄົນ ຕາຍແລ້ວ ຊາຍຜູ້ນັ້ນ ຍ້ອນມານດານັ້ນຕາຍແລ້ວ ຈຶ່ງເປັນບ້າ ມີໃຈຟຸ້ງຊ່ານ ຈາກຖະໜົນນີ້ເຂົ້າໄປສູ່ຖະໜົນນັ້ນ ຈາກຮ່ອມນີ້ເຂົ້າໄປສູ່ຮ່ອມນັ້ນ ເວົ້າແນວນີ້ວ່າ ພວກທ່ານເຫັນແມ່ຂອງເຮົາແດ່ບໍ່ ພວກທ່ານເຫັນມານດາຂອງເຮົາແດ່ບໍ່

ພາມ ເລື້ອງເຄີຍມີມາແລ້ວ ໃນເມືອງສາວັດຖີນີ້ເອງ ບິດາຂອງຊາຍບາງຄົນ ຕາຍແລ້ວ ຯລຯ ອ້າຍນ້ອງຊາຍຕາຍແລ້ວ ຯລຯ ເອື້ອຍນ້ອງສາວຕາຍແລ້ວ ຯລຯ ບຸດຕາຍແລ້ວ ຯລຯ ທິດາຕາຍແລ້ວ ຯລຯ ພັນລະຍາຕາຍແລ້ວ ຯລຯ ຊາຍຜູ້ນັ້ນ ຍ້ອນພັນລະຍານັ້ນຕາຍແລ້ວ ຈຶ່ງເປັນບ້າ ມີໃຈຟຸ້ງຊ່ານ ຈາກຖະໜົນນີ້ເຂົ້າໄປສູ່ຖະໜົນນັ້ນ ຈາກຮ່ອມນີ້ເຂົ້າໄປສູ່ຮ່ອມນັ້ນ ເວົ້າແນວນີ້ວ່າ ພວກທ່ານເຫັນພັນລະຍາຂອງເຮົາແດ່ບໍ່ ພວກທ່ານເຫັນເມຍຂອງເຮົາແດ່ບໍ່

ພາມ ເລື້ອງເຄີຍມີມາແລ້ວ ໃນເມືອງສາວັດຖີນີ້ເອງ ແມ່ຍິງບາງຄົນໄປສູ່ຕະກູນຂອງຍາດພີ່ນ້ອງ ພວກຍາດພີ່ນ້ອງຂອງນາງຕ້ອງການພາກສາມີ ແລ້ວຍົກແມ່ຍິງນັ້ນໃຫ້ແກ່ບຸຣຸດອື່ນ ແຕ່ນາງບໍ່ຢາກໄດ້ບຸຣຸດນັ້ນ ລຳດັບນັ້ນ ແມ່ຍິງນັ້ນຈຶ່ງໄດ້ເວົ້າກັບສາມີດັ່ງນີ້ວ່າ ອ້າຍເອີ້ຍ ພວກຍາດພີ່ນ້ອງເຫຼົ່ານີ້ ຕ້ອງການຈະພາກເຮົາຈາກທ່ານແລ້ວຍົກໃຫ້ແກ່ຊາຍອື່ນ ເຮົາທັງສອງຈັກຕາຍນຳກັນ ທັນໃດນັ້ນ ຊາຍຜູ້ນັ້ນຈຶ່ງຟັນແມ່ຍິງນັ້ນຂາດເປັນ ໔ ທ່ອນແລ້ວຂ້າຕົນເອງດ້ວຍ ຫວັງວ່າເຮົາທັງ ໔ ເມື່ອລະ (ໂລກນີ້) ແລ້ວຈັກໄດ້ໄປຢູ່ຮ່ວມກັນ ສັດຜູ້ຖືກລູກສອນຄືໂສກະປັກຕິດ ຄືສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍແລ່ນໄປ ແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປ ແນວນີ້ແດ່

ສັດຜູ້ຖືກລູກສອນຄືຄວາມສົງໄສປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍແລ່ນໄປສູ່ຄວາມສົງໄສ ແລ່ນໄປສູ່ຄວາມແຄງໃຈ ສອງຈິດສອງໃຈວ່າ ໃນອະດີດ ຕະການຍາວນານເຮົາໄດ້ມີແລ້ວ ຫຼື ບໍ່ໄດ້ມີແລ້ວນໍ ເຮົາໄດ້ເປັນອັນໃດມານໍ ເຮົາໄດ້ ເປັນແນວໃດ?ມານໍ ເຮົາໄດ້ເປັນອັນໃດແລ້ວມາເປັນອັນໃດນໍ ໃນອະນາຄົດຕະການຍາວນານ ເຮົາຈັກມີ ຫຼື ຈັກບໍ່ມີນໍ ເຮົາຈັກເປັນອັນໃດນໍ ຈັກ ເປັນແນວໃດ?ນໍ ຈັກເປັນອັນໃດແລ້ວໄປເປັນອັນໃດນໍ ຫຼື ໃນປັດຈຸບັນ ໃນບັດນີ້ ກໍມີຄວາມສົງໄສຢູ່ພາຍໃນວ່າ ເຮົາເປັນຢູ່ ຫຼືບໍ່ນໍ ເຮົາເປັນອັນໃດນໍ ເຮົາ ເປັນແນວໃດ?ນໍ ສັດນີ້ມາຈາກໃສນໍ ເຂົາຈັກໄປບ່ອນໃດກັນນໍ ສັດຜູ້ຖືກລູກສອນຄືຄວາມສົງໄສປັກຕິດ ຄື ສຽບແທງ ຖືກຕ້ອງ ສຽບ ຕິດແໜ້ນ ຄາຄ້າງຢູ່ ກໍແລ່ນໄປ ແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປ ແນວນີ້ແດ່

ສັດປຸງແຕ່ງລູກສອນເຫຼົ່ານັ້ນໃຫ້ເກີດຂຶ້ນ ເມື່ອປຸງແຕ່ງລູກສອນເຫຼົ່ານັ້ນໃຫ້ເກີດຂຶ້ນ ກໍແລ່ນຜ່ານໄປທາງທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ດ້ວຍອຳນາດການປຸງແຕ່ງລູກສອນໃຫ້ເກີດຂຶ້ນ ການປຸງແຕ່ງລູກສອນເຫຼົ່ານັ້ນຍັງລະບໍ່ໄດ້ ຍ້ອນຍັງລະການປຸງແຕ່ງລູກສອນບໍ່ໄດ້ ຈຶ່ງແລ່ນຜ່ານໄປໃນຄະຕິ ນະຣົກ ກຳເນີດເດຍຣັດສານ ເຜດວິໄສ ມະນຸດໂລກເທວະໂລກ ແລ່ນໄປ ແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປ ຈາກຄະຕິນີ້ໄປສູ່ຄະຕິນັ້ນ ຈາກການຖືກຳເນີດນີ້ໄປສູ່ການຖືກຳເນີດນັ້ນ ຈາກປະຕິສົນທິນີ້ໄປສູ່ ປະຕິສົນທິນັ້ນ ຈາກພົບນີ້ໄປສູ່ພົບນັ້ນ ຈາກສົງສານນີ້ໄປສູ່ສົງສານນັ້ນ ຈາກວັດຕະນີ້ໄປສູ່ວັດຕະນັ້ນ ລວມຄວາມວ່າ ສັດຖືກລູກສອນໃດປັກຕິດແລ້ວ ແລ່ນຜ່ານໄປທຸກທິດທາງ

ຄຳວ່າ ຍ້ອນຖອນລູກສອນນັ້ນໄດ້ແລ້ວ ຈຶ່ງບໍ່ຕ້ອງແລ່ນຜ່ານ ບໍ່ຕ້ອງຫຼົ່ມຈົມ ອະທິບາຍວ່າ ຍ້ອນຖອນ ຄື ຍ້ອນຖອດ ດຶງ ລົກ ລາກ ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງລູກສອນຄື ຣາຄະ ລູກສອນ ຄື ໂທສະ ລູກສອນ ຄື ໂມຫະ ລູກສອນ ຄື ມານະ ລູກສອນ ຄື ທິດຖິ ລູກສອນ ຄື ໂສກະ ລູກສອນ ຄື ຄວາມສົງໄສໄດ້ແລ້ວ ຈຶ່ງບໍ່ຕ້ອງແລ່ນຜ່ານໄປທາງທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ລະການປຸງແຕ່ງລູກສອນ

ໃຫ້ເກີດຂຶ້ນເຫຼົ່ານັ້ນ ຍ້ອນລະການປຸງແຕ່ງລູກສອນໃຫ້ເກີດຂຶ້ນໄດ້ແລ້ວ ຈຶ່ງບໍ່ຕ້ອງແລ່ນຜ່ານໄປໃນຄະຕິ ນະຮົກ ກຳເນີດເດຍຣັດສານ ເຜດວິໄສ ມະນຸດໂລກ ເທວະໂລກ ບໍ່ຕ້ອງແລ່ນໄປແລ່ນຜ່ານ ຄື ລົນລານ ທ່ອງທ່ຽວໄປຈາກຄະຕິນີ້ໄປສູ່ຄະຕິນັ້ນ ຈາກການຖືກຳເນີດນີ້ໄປສູ່ການຖືກຳເນີດນັ້ນ ຈາກປະຕິສົນທິນີ້ໄປສູ່ປະຕິສົນທິນັ້ນ ຈາກພົບນີ້ໄປສູ່ພົບນັ້ນ ຈາກສົງສານນີ້ໄປສູ່ສົງສານນັ້ນ ຈາກວັດຕະນີ້ໄປສູ່ວັດຕະນັ້ນ ລວມຄວາມວ່າ ຍ້ອນຖອນລູກສອນນັ້ນໄດ້ແລ້ວ ຈຶ່ງບໍ່ຕ້ອງແລ່ນຜ່ານ

ຄຳວ່າ ບໍ່ຕ້ອງຫຼົ່ມຈົມ ໄດ້ແກ່ ບໍ່ຕ້ອງຫຼົ່ມຈົມໃນໂອຄະຄືການ ບໍ່ຕ້ອງຫຼົ່ມຈົມໃນໂອຄະຄືພົບ ບໍ່ຕ້ອງຫຼົ່ມຈົມໃນໂອຄະ ຄື ທິດຖິ ບໍ່ຕ້ອງຫຼົ່ມຈົມໃນໂອຄະ ຄື ອະວິດຊາ ຄື ບໍ່ຕ້ອງຈົມ ບໍ່ຕ້ອງຈົມລົງ ບໍ່ຕ້ອງຫຼົ່ມຈົມລົງ ບໍ່ໄປ ບໍ່ຕົກໄປ ລວມຄວາມວ່າ ຍ້ອນຖອນລູກສອນນັ້ນໄດ້ແລ້ວຈຶ່ງບໍ່ຕ້ອງແລ່ນຜ່ານ ບໍ່ຕ້ອງຫຼົ່ມຈົມ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ສັດຖືກລູກສອນໃດປັກຕິດແລ້ວ
ແລ່ນຜ່ານໄປທຸກທິດທາງ
ຍ້ອນຖອນລູກສອນນັ້ນໄດ້ແລ້ວ
ຈຶ່ງບໍ່ຕ້ອງແລ່ນຜ່ານ ບໍ່ຕ້ອງຫຼົ່ມຈົມ

[໑໗໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄົນທັງຫຼາຍກ່າວເຖິງການສຶກສາ
ຍ້ອນກາມມະຄຸນທີ່ພົວພັນຢູ່ໃນໂລກ
ບຸກຄົນບໍ່ເພິ່ງເປັນຜູ້ຂວນຂວາຍໃນການສຶກສາ
ຫຼື ກາມມະຄຸນເຫຼົ່ານັ້ນ ຮູ້ແຈ້ງກາມໂດຍປະການທັງປວງແລ້ວ
ເພິ່ງສຶກສາເພື່ອຄວາມດັບກິເລດຂອງຕົນ

## ວ່າດ້ວຍການສຶກສາເພື່ອໄດ້ກາມມະຄຸນ

ຄຳວ່າ ຄົນທັງຫຼາຍກ່າວເຖິງການສຶກສາ ຍ້ອນກາມມະຄຸນທີ່ພົວພັນຢູ່ໃນໂລກ ອະທິບາຍວ່າ

ຄຳວ່າ ການສຶກສາ ໄດ້ແກ່ ການສຶກສາເລື້ອງຊ້າງ ການສຶກສາເລື້ອງມ້າ ການສຶກສາເລື້ອງລົດ ການສຶກສາເລື້ອງທະນູ ການເສກເປົ່າ ວິຊາປາດ ການບຳບັດຮັກສາທາງຢາ ວິຊາໝໍຜີ ວິຊາໝໍເດັກນ້ອຍ (ກຸມາຣະເວດ)

ຄຳວ່າ ກ່າວເຖິງ ໄດ້ແກ່ ກ່າວເຖິງ ຄື ເລົ່າເຖິງ ເວົ້າເຖິງ ບອກເຖິງ ສະແດງເຖິງ ຊີ້ແຈ່ງເຖິງ

ອີກໄນໜຶ່ງ ຄຳວ່າ ກ່າວເຖິງ ໄດ້ແກ່ ຮຽນ ຮ່ຳຮຽນ ຊົງຈຳ ເຂົ້າໄປຊົງຈຳ ເພື່ອໄດ້ການມະຄຸນທີ່ພົວພັນຢູ່ ການມະຄຸນ ໕ ຄື

໑. ຮູບທີ່ຮູ້ໄດ້ທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ຮູ້ໄດ້ທາງຫູ ຯລຯ
໕. ໂຜດຖັບພະທີ່ຮູ້ໄດ້ທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຕັດຮຽກວ່າ ການມະຄຸນທີ່ພົວພັນຢູ່

ຍ້ອນເຫດໃດ ການມະຄຸນ ໕ ຈຶ່ງຕັດຮຽກວ່າ ການມະຄຸນທີ່ພົວພັນຢູ່ ເທວະດາແລະມະນຸດສ່ວນຫຼາຍ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງການມະຄຸນ ໕ ຍ້ອນເຫດນັ້ນ ການມະຄຸນ ໕ ຈຶ່ງຕັດຮຽກວ່າ ການມະຄຸນທີ່ພົວພັນຢູ່

ຄຳວ່າ ໃນໂລກ ໄດ້ແກ່ ໃນມະນຸດໂລກ ລວມຄວາມວ່າ ຄົນທັງຫຼາຍກ່າວເຖິງການສຶກສາ ຍ້ອນການມະຄຸນທີ່ພົວພັນຢູ່ໃນໂລກ

ຄຳວ່າ ບຸກຄົນບໍ່ເພິ່ງເປັນຜູ້ຂວນຂວາຍໃນການສຶກສາ ຫຼື ການມະຄຸນເຫຼົ່ານັ້ນ ອະທິບາຍວ່າ ບຸກຄົນບໍ່ເພິ່ງຂວນຂວາຍ ຄື ບໍ່ເພິ່ງເອນໄປ ບໍ່ໂອນໄປ ບໍ່ໂນ້ມໄປ ບໍ່ນ້ອມໃຈໄປ ບໍ່ເພິ່ງເປັນຜູ້ມີການສຶກສາ ຫຼື ການມະຄຸນ ໕ ນັ້ນ ໆ ເປັນໃຫຍ່ ລວມຄວາມວ່າ ບຸກຄົນ ບໍ່ເພິ່ງເປັນຜູ້ຂວນຂວາຍໃນການສຶກສາ ຫຼື ການມະຄຸນເຫຼົ່ານັ້ນ

ຄຳວ່າ ຮູ້ແຈ້ງ ຯລຯ ແລ້ວ ໃນຄຳວ່າ ຮູ້ແຈ້ງການໂດຍປະການທັງປວງແລ້ວ ໄດ້ແກ່ ແທງຕະຫຼອດແລ້ວ ຄື ແທງຕະຫຼອດແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ໂດຍປະການທັງປວງ ໄດ້ແກ່ ທຸກສິ່ງໂດຍປະການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ໂດຍປະການທັງປວງ ນີ້ເປັນຄຳກ່າວ ລວມໄວ້ທັງໝົດ

ຄຳວ່າ ການ ໄດ້ແກ່ ການ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸການ (໒) ກິເລດການ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸການ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດການ ລວມຄວາມວ່າ ຮູ້ແຈ້ງການໂດຍປະການທັງປວງແລ້ວ

ຄຳວ່າ ສຶກສາ ໃນຄຳວ່າ ເພິ່ງສຶກສາເພື່ອຄວາມດັບກິເລດຂອງຕົນ ໄດ້ແກ່ ສິກຂາ ໓ ຢ່າງ ຄື

໑. ອະທິສີລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ ຯລຯ ນີ້ຊື່ວ່າອະທິປັນຍາສິກຂາ

ຄຳວ່າ ເພື່ອຄວາມດັບກິເລດຂອງຕົນ ອະທິບາຍວ່າ ເພິ່ງສຶກສາທັງອະທິສີລະສິກຂາ ອະທິຈິດຕະສິກຂາ ແລະອະທິປັນຍາສິກຂາເພື່ອດັບຣາຄະ ດັບໂທສະ ດັບໂມຫະ ແລະອື່ນ ໆ ເພື່ອສະງົບ ເຂົ້າໄປສະງົບ ສະງົບເຢັນ ດັບ ສະລັດຖິ້ມ ສະງົບຣະງັບອະກຸສະລາພິສັງຂານທຸກປະເພດຂອງຕົນສາໄດ້

ສິກຂາ ໓ ເຫຼົ່ານີ້ ເມື່ອບຸກຄົນນຶກເຖິງຊື່ວ່າເພິ່ງສຶກສາ ເມື່ອຮູ້ຊື່ວ່າເພິ່ງສຶກສາ ຯລຯ ເມື່ອເຮັດໃຫ້ແຈ້ງສິ່ງທີ່ຄວນເຮັດໃຫ້ແຈ້ງຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ເພິ່ງສຶກສາເພື່ອຄວາມດັບກິເລດຂອງຕົນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄົນທັງຫຼາຍກ່າວເຖິງການສຶກສາ
ຍ້ອນການມະຄຸນທີ່ພົວພັນຢູ່ໃນໂລກ
ບຸກຄົນບໍ່ເພິ່ງເປັນຜູ້ຂວນຂວາຍໃນການສຶກສາ
ຫຼື ການມະຄຸນເຫຼົ່ານັ້ນ ຮູ້ແຈ້ງການໂດຍປະການທັງປວງແລ້ວ
ເພິ່ງສຶກສາເພື່ອຄວາມດັບກິເລດຂອງຕົນ

[໑໗໖] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີເພິ່ງເປັນຜູ້ມີສັດຈະ ບໍ່ຄະນອງ ບໍ່ມີຄວາມຫຼອກລວງ
ປາສະຈາກວາຈາສັບສໍ່ ບໍ່ໂກດ ຂ້າມພົ້ນຄວາມໂລບອັນຊົ່ວ
ແລະຄວາມຫວງແຫນໄດ້ແລ້ວ

ຄຳວ່າ ເພິ່ງເປັນຜູ້ມີສັດຈະ ໃນຄຳວ່າ ມຸນີເພິ່ງເປັນຜູ້ມີສັດຈະ ບໍ່ຄະນອງ ອະທິບາຍວ່າ ເພິ່ງປະກອບດ້ວຍວາຈາສັດ ຄື ປະກອບດ້ວຍສຳມາທິດຖິ ປະກອບດ້ວຍອະຣິຍະມັກມີອົງ ໘ ລວມຄວາມວ່າ ເພິ່ງເປັນຜູ້ມີສັດຈະ

ຄຳວ່າ ບໍ່ຄະນອງ ໄດ້ແກ່ ຄວາມຄະນອງ ໓ ຢ່າງ ຄື

໑. ຄວາມຄະນອງທາງກາຍ
໒. ຄວາມຄະນອງທາງວາຈາ
໓. ຄວາມຄະນອງທາງໃຈ ຯລຯ ນີ້ຊື່ວ່າຄວາມຄະນອງທາງໃຈ

ຄວາມຄະນອງ ໓ ຢ່າງເຫຼົ່ານີ້ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ບໍ່ຄະນອງ ລວມຄວາມວ່າ ມຸນີເພິ່ງເປັນຜູ້ມີສັດຈະ ບໍ່ຄະນອງ

## ວ່າດ້ວຍຄວາມເປັນຜູ້ຫຼອກລວງ

ຄຳວ່າ ບໍ່ມີຄວາມຫຼອກລວງ ປາສະຈາກວາຈາສັບສໍ່ ອະທິບາຍວ່າ ຄວາມປະພຶດຫຼອກລວງ ຕັດຮຽກວ່າ ຄວາມຫຼອກລວງ

ຄົນບາງຄົນໃນໂລກນີ້ປະພຶດທຸດຈະຣິດດ້ວຍກາຍ ວາຈາ ໃຈແລ້ວ ຕັ້ງຄວາມປາຖະ ໜາຊົ່ວໄວ້ ຍ້ອນການປົກປິດທຸດຈະຣິດນັ້ນເປັນເຫດ ຄື ປາຖະໜາວ່າ ໃຜຢ່າຮູ້ທັນເຮົາເລີຍ ດຳຣິວ່າ ໃຜຢ່າຮູ້ທັນເຮົາເລີຍ ກ່າວວາຈາດ້ວຍຄິດວ່າ ໃຜຢ່າຮູ້ທັນເຮົາເລີຍ ພະຍາຍາມທາງກາຍດ້ວຍຄິດວ່າ ໃຜຢ່າຮູ້ທັນເຮົາເລີຍ

ຄວາມຫຼອກລວງ ຄວາມເປັນຜູ້ມີຄວາມຫຼອກລວງ ຄວາມທຳທ່າ ຄວາມລວງ ຄວາມລໍ້ລວງ ການປິດບັງ ການຫຼີບລ່ຽງ ການຫຼີກລ່ຽງ ການຊ້ອນ ການເສື່ອງ ການປິດ ການປົກປິດ ການບໍ່ເປີດເຜີຍ ການບໍ່ເຮັດໃຫ້ແຈ່ມແຈ້ງ ການປິດສະນິດ ການທຳຄວາມຊົ່ວເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຫຼອກລວງ

ຄວາມຫຼອກລວງນີ້ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟ ຄື ຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ບໍ່ມີຄວາມຫຼອກລວງ

ຄຳວ່າ ວາຈາສັບສໍ່ ໃນຄຳວ່າ ປາສະຈາກວາຈາສັບສໍ່ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ເປັນຜູ້ມີວາຈາສັບສໍ່ ຯລຯ ບຸກຄົນຍ່ອມນຳວາຈາສັບສໍ່ເຂົ້າໄປດ້ວຍຄວາມປະສົງໃຫ້ເຂົາແຕກກັນ ວາຈາສັບສໍ່ນີ້ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ປາສະຈາກ ວາຈາສັບສໍ່ ຄື ໝົດວາຈາສັບສໍ່ແລ້ວ ລວມຄວາມວ່າ ບໍ່ມີຄວາມຫຼອກລວງ ປາສະຈາກວາຈາສັບສໍ່

ຄຳວ່າ ບໍ່ໂກດ ໃນຄຳວ່າ ມຸນີ ຯລຯ ບໍ່ໂກດ ຂ້າມພົ້ນຄວາມໂລບອັນຊົ່ວແລະຄວາມຫວງແຫນໄດ້ແລ້ວ ອະທິບາຍວ່າ ກ່າວໄວ້ແລ້ວແລ ອັນໜຶ່ງ ຄວນກ່າວເຖິງຄວາມໂກດກ່ອນ ຄວາມໂກດຍ່ອມເກີດໄດ້ຍ້ອນເຫດ ໑໐ ຢ່າງ ຯລຯ ຄວາມໂກດນັ້ນຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄື ຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ບໍ່ໂກດ

ບຸກຄົນຊື່ວ່າຜູ້ບໍ່ໂກດ ຍ້ອນລະຄວາມໂກດໄດ້ແລ້ວ
ບຸກຄົນຊື່ວ່າຜູ້ບໍ່ໂກດ ຍ້ອນກຳນົດຮູ້ວັດຖຸແຫ່ງຄວາມໂກດໄດ້ແລ້ວ
ບຸກຄົນຊື່ວ່າຜູ້ບໍ່ໂກດ ຍ້ອນຕັດເຫດແຫ່ງຄວາມໂກດໄດ້ແລ້ວ

ຄຳວ່າ ຄວາມໂລບ ໄດ້ແກ່ ຄວາມໂລບ ກິຣິຍາທີ່ໂລບ ພາວະທີ່ໂລບ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ມັດສະຣິຍະ ໕ ຢ່າງ ຄື (໑) ອາວາດມັດສະຣິຍະ ຯລຯ ຄວາມມຸ້ງແຕ່ຈະໄດ້ ຕັດຮຽກວ່າ ຄວາມຂີ້ຖີ່

ຄຳວ່າ ມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ມຸນີ ຯລຯ ບໍ່ໂກດ ຂ້າມພົ້ນຄວາມໂລບອັນຊົ່ວ ແລະຄວາມຫວງແຫນໄດ້ແລ້ວ ອະທິບາຍວ່າ ມຸນີ ຂ້າມໄດ້ແລ້ວ ຄື ຂ້າມໄປໄດ້ແລ້ວ ຂ້າມພົ້ນແລ້ວ ກ້າວລ່ວງແລ້ວ ກ້າວລ່ວງດ້ວຍດີ ລ່ວງເລີຍແລ້ວເຊິ່ງຄວາມໂລບອັນຊົ່ວ ແລະຄວາມຫວງແຫນໄດ້ແລ້ວ ລວມຄວາມວ່າ ມຸນີ ຯລຯ ບໍ່ໂກດ ຂ້າມພົ້ນຄວາມໂລບອັນຊົ່ວ ແລະ ຄວາມຫວງແຫນໄດ້ແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ມຸນີເພິ່ງເປັນຜູ້ມີສັດຈະ ບໍ່ຄະນອງ ບໍ່ມີຄວາມຫຼອກລວງ
ປາສະຈາກວາຈາສັບສໍ່ ບໍ່ໂກດ ຂ້າມພົ້ນຄວາມໂລບອັນຊົ່ວ
ແລະຄວາມຫວງແຫນໄດ້ແລ້ວ

[໑໗໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນໍຣະຊົນເພິ່ງຄວບຄຸມຄວາມຫຼັບ ຄວາມຂີ້ຄ້ານ
ຄວາມທໍ້ທໍ້ ບໍ່ເພິ່ງຢູ່ດ້ວຍຄວາມຜະໝາດ
ບໍ່ເພິ່ງຕັ້ງຢູ່ໃນຄວາມດູໝິ່ນ ເພິ່ງນ້ອມໃຈໄປໃນນິບພານ

## ວ່າດ້ວຍຄວາມຂີ້ຄ້ານ

ຄຳວ່າ ເພິ່ງຄວບຄຸມຄວາມຫຼັບ ຄວາມຂີ້ຄ້ານ ຄວາມທໍ້ທໍ້ ອະທິບາຍວ່າ

ຄຳວ່າ ຄວາມຫຼັບ ໄດ້ແກ່ ຄວາມທີ່ກາຍບໍ່ຄ່ອງແຄ່ວ ຄວາມທີ່ກາຍບໍ່ຄວນແກ່ການງານ ອາການຍຸດ ອາການພັກ ອາການພັກຜ່ອນພາຍໃນ ຄວາມງ່ວງ ພາວະທີ່ຫຼັບ ອາການ ສັບປະຫງົກ ຄວາມຫຼັບ ກິຣິຍາທີ່ຫຼັບ ພາວະທີ່ຫຼັບ

ຄຳວ່າ ຄວາມຂີ້ຄ້ານ ໄດ້ແກ່ ຄວາມຂີ້ຄ້ານ ກິຣິຍາທີ່ຂີ້ຄ້ານ ພາວະທີ່ຂີ້ຄ້ານ ຄວາມເປັນຜູ້ມີໃຈຂີ້ຄ້ານ ຄວາມຂີ້ຄ້ານ ກິຣິຍາທີ່ຂີ້ຄ້ານ ພາວະທີ່ຂີ້ຄ້ານ

ຄຳວ່າ ຄວາມທໍ້ທໍ້ ໄດ້ແກ່ ຄວາມທີ່ຈິດບໍ່ຄ່ອງແຄ່ວ ຄວາມທີ່ຈິດບໍ່ຄວນແກ່ການງານ ຄວາມຫົດຫູ່ ກິຣິຍາທີ່ຫົດຫູ່ ຄວາມທໍ້ຖອຍ ກິຣິຍາທີ່ທໍ້ຖອຍ ພາວະທີ່ທໍ້ຖອຍ ຄວາມທໍ້ທໍ້ ກິຣິຍາທີ່ທໍ້ທໍ້ ຄວາມເປັນຜູ້ມີຈິດທໍ້ທໍ້

ຄຳວ່າ ເພິ່ງຄວບຄຸມຄວາມຫຼັບ ຄວາມຂີ້ຄ້ານ ຄວາມຫຍໍ້ທໍ້ ອະທິບາຍວ່າ ເພິ່ງຄວບຄຸມ ຄື ຄອບຄອງ ຍຶດຄອງ ຄອບງຳ ຖ້ອມທັບ ຮັດຄືງ ຍ່ຳຍີຄວາມຫຼັບ ຄວາມຂີ້ຄ້ານແລະຄວາມຫ ຍໍ້ທໍ້ ລວມຄວາມວ່າ ເພິ່ງຄວບຄຸມຄວາມຫຼັບ ຄວາມຂີ້ຄ້ານ ຄວາມຫຍໍ້ທໍ້

ຄຳວ່າ ບໍ່ເພິ່ງຢູ່ດ້ວຍຄວາມຜະໝາດ ອະທິບາຍວ່າ ຂໍກ່າວເຖິງຄວາມຜະໝາດ ຄວາມ ປ່ອຍຈິດໄປ ຫຼື ການເພີ່ມພູນຄວາມປ່ອຍຈິດໄປໃນກາມມະຄຸນ ໕ ດ້ວຍກາຍທຸດຈະຣິດ ວະຈີ ທຸດຈະຣິດ ມະໂນທຸດຈະຣິດ ຫຼື ການເຮັດໂດຍບໍ່ເຄົາລົບ ການເຮັດທີ່ບໍ່ໃຫ້ຕິດຕໍ່ ການເຮັດທີ່ ບໍ່ໝັ້ນຄົງ ຄວາມປະພຶດຫຍໍ້ຫຍ່ອນ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມ ບໍ່ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມຕັ້ງໃຈບໍ່ຈິງ ຄວາມບໍ່ໝັ່ນປະກອບ ຄວາມຜະ ໝາດໃນ ການຈະເລີນກຸສົນທຳທັງຫຼາຍ ຊື່ວ່າຄວາມຜະໝາດ ຄວາມຜະໝາດ ກິຣິຍາທີ່ຜະ ໝາດ ພາວະ ທີ່ຜະໝາດມີລັກສະນະເຊັ່ນວ່ານີ້ ນີ້ຕັດຮຽກວ່າ ຄວາມຜະໝາດ

ຄຳວ່າ ບໍ່ເພິ່ງຢູ່ດ້ວຍຄວາມຜະໝາດ ອະທິບາຍວ່າ ບໍ່ເພິ່ງຢູ່ ຄື ບໍ່ເພິ່ງຢູ່ຮ່ວມ ບໍ່ເພິ່ງຢູ່ ອາໄສ ບໍ່ເພິ່ງຢູ່ຄອງກັບຄວາມຜະໝາດ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງ ຄວາມບໍ່ມີອີກເຊິ່ງຄວາມຜະໝາດ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດ ພົ້ນ ບໍ່ກ່ຽວຂ້ອງກັບຄວາມຜະໝາດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ ເພິ່ງຢູ່ດ້ວຍຄວາມຜະໝາດ

ຄຳວ່າ ຄວາມດູໝິ່ນ ໃນຄຳວ່າ ບໍ່ເພິ່ງຕັ້ງຢູ່ໃນຄວາມດູໝິ່ນ ອະທິບາຍວ່າ ຄົນບາງຄົນ ໃນໂລກນີ້ ດູໝິ່ນຜູ້ອື່ນຍ້ອນຊາດແດ່ ຍ້ອນໂຄດແດ່ ໆລໆ ຍ້ອນເລື້ອງອື່ນ ນອກຈາກທີ່ກ່າວ ແລ້ວແດ່ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງ ເຫັນປານນີ້ ນີ້ຕັດຮຽກວ່າ ຄວາມດູໝິ່ນ

ຄຳວ່າ ບໍ່ເພິ່ງຕັ້ງຢູ່ໃນຄວາມດູໝິ່ນ ອະທິບາຍວ່າ ບໍ່ເພິ່ງຕັ້ງຢູ່ ຄື ບໍ່ເພິ່ງດຳຣົງຢູ່ໃນ ຄວາມດູໝິ່ນ ໄດ້ແກ່ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມດູ ໝິ່ນ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມດູ ໝິ່ນ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງຕັ້ງຢູ່ໃນຄວາມ ດູໝິ່ນ

## ວ່າດ້ວຍການທຳບຸນມຸ້ງນິບພານ

ຄຳວ່າ ນໍຣະຊົນ ໆລໆເພິ່ງນ້ອມໃຈໄປໃນນິບພານ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ ເມື່ອໃຫ້ທານ ສະມາທານສິນ ເຮັດອຸໂປສົດຖະກຳ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນວັດ ໄຫວ້ ເຈດີ ວາງຂອງຫອມ ແລະມາລາທີ່ເຈດີ ທຳປະທັກຂິນເຈດີ ບຳເພັນກຸສະລາພິສັງຂານແນວໃດ ແນວໜຶ່ງ ອັນເປັນໄປໃນໄຕຣທາດ ກໍບໍ່ແມ່ນຍ້ອນເຫດແຫ່ງຄະຕິ ບໍ່ແມ່ນຍ້ອນເຫດແຫ່ງການຖື ກຳເນີດ ບໍ່ແມ່ນຍ້ອນເຫດແຫ່ງປະຕິສົນທິ ບໍ່ແມ່ນຍ້ອນເຫດແຫ່ງພົບ ບໍ່ແມ່ນຍ້ອນເຫດແຫ່ງສົງ

ສານ ບໍ່ແມ່ນຍ້ອນເຫດແຫ່ງວັດຕະ ເປັນຜູ້ປະສົງຈະພາກຈາກທຸກ ເອນໄປໃນນິບພານ ໂອນໄປ ໃນນິບພານ ນ້ອມໄປໃນນິບພານ ບໍາເພັນກຸສົນທັງປວງນັ້ນ ລວມຄວາມວ່າ ນໍຣະຊົນ ໗ລ໗ ເພິ່ງນ້ອມໃຈໄປໃນນິບພານ ແນວນີ້ແດ່

ອີກໄນໜຶ່ງ ນໍຣະຊົນບັງຄັບຈິດໃຫ້ກັບຈາກສັງຂານທາດທັງປວງ ນ້ອມຈິດເຂົ້າໄປໃນ ອະມະຕະທາດວ່າ ທໍາເປັນທີ່ຣະງັບສັງຂານທັງປວງ ເປັນທີ່ສະລັດຖິ້ມອຸປະທິທັງໝົດ ເປັນທີ່ສິ້ນຕັນຫາ ເປັນທີ່ຄາຍກໍາໜັດ ເປັນທີ່ດັບກິເລດ ເປັນທີ່ເຢັນສະນິດ ເປັນທໍາມະຊາດສະງົບ ປະນີດ ລວມຄວາມວ່າ ນໍຣະຊົນ ໗ລ໗ ເພິ່ງນ້ອມໃຈໄປໃນນິບພານ ແນວນີ້ແດ່

ບັນດິດທັງຫຼາຍຍ່ອມບໍ່ໃຫ້ທານ
ຍ້ອນເຫດແຫ່ງສຸກອັນກໍ່ອຸປະທິເພື່ອພົບໃໝ່
ແຕ່ບັນດິດເຫຼົ່ານັ້ນຍ່ອມໃຫ້ທານເພື່ອຄວາມໝົດສິ້ນອຸປະທິ
ເພື່ອນິບພານອັນບໍ່ມີພົບໃໝ່
ບັນດິດທັງຫຼາຍຍ່ອມບໍ່ຈະເລີນຊານ
ຍ້ອນເຫດແຫ່ງສຸກອັນກໍ່ອຸປະທິເພື່ອພົບໃໝ່
ແຕ່ບັນດິດເຫຼົ່ານັ້ນຍ່ອມຈະເລີນຊານເພື່ອຄວາມໝົດສິ້ນອຸປະທິ
ເພື່ອນິບພານອັນບໍ່ມີພົບໃໝ່
ບັນດິດເຫຼົ່ານັ້ນ ມີໃຈມຸ້ງນິບພານ
ມີຈິດເອນໄປໃນນິບພານນັ້ນ
ມີຈິດນ້ອມໄປໃນນິບພານນັ້ນໃຫ້ທານ
ບັນດິດເຫຼົ່ານັ້ນຍ່ອມເປັນຜູ້ມີນິບພານເປັນເບື້ອງໜ້າ
ເໝືອນແມ່ນໍ້າໄຫຼລົງສູ່ທະເລ ສັນນັ້ນ

ລວມຄວາມວ່າ ນໍຣະຊົນ ໗ລ໗ ເພິ່ງນ້ອມໃຈໄປໃນນິບພານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ນໍຣະຊົນເພິ່ງຄວບຄຸມຄວາມຫຼັບ ຄວາມຂີ້ຄ້ານ
ຄວາມຫຍໍ້ທໍ້ ບໍ່ເພິ່ງຢູ່ດ້ວຍຄວາມຜະໝາດ
ບໍ່ເພິ່ງຕັ້ງຢູ່ໃນຄວາມດູໝິ່ນ ເພິ່ງນ້ອມໃຈໄປໃນນິບພານ

[໑໗໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນໍຣະຊົນບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ
ບໍ່ເພິ່ງເຮັດຄວາມສະເນ່ຫາໃນຮູບ ເພິ່ງກໍານົດຮູ້ຄວາມຖືຕົວ
ແລະເພິ່ງປະພຶດລະເວັ້ນຈາກຄວາມຮີບຟ້າວ

ຄຳວ່າ ນໍຣະຊົນບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ ອະທິບາຍວ່າ ມຸສາວາດ ຕັດຮຽກວ່າ ຄວາມເປັນຄົນເວົ້າຕົວະ ຄົນບາງຄົນໃນໂລກນີ້ ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງຍາດພີ່ນ້ອງ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ ບຸກຄົນນັ້ນບໍ່ຮູ້ກໍເວົ້າວ່າ ຮູ້ ຫຼື ຮູ້ ກໍເວົ້າວ່າ ບໍ່ຮູ້ ບໍ່ເຫັນກໍເວົ້າວ່າ ເຫັນ ຫຼື ເຫັນກໍເວົ້າວ່າ ບໍ່ເຫັນ ເວົ້າຕົວະທັງທີ່ຮູ້ ຍ້ອນຕົນ ເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດ ຄື ເຫັນແກ່ອາມິດເລັກ ໆ ໜ້ອຍ ໆ ແດ່ ນີ້ຕັດຮຽກວ່າຄວາມເປັນຄົນເວົ້າຕົວະ

ອີກໄນໜຶ່ງ ມຸສາວາດມີໄດ້ດ້ວຍອາການ ໓ ຢ່າງ ຯລຯ ດ້ວຍອາການ ໔ ຢ່າງ ຯລຯ ດ້ວຍອາການ ໕ ຢ່າງ ຯລຯ ດ້ວຍອາການ ໖ ຢ່າງ ຯລຯ ດ້ວຍອາການ ໗ ຢ່າງ ຯລຯ ດ້ວຍອາການ ໘ ຢ່າງ ຯລຯ ມຸສາວາດມີໄດ້ດ້ວຍອາການ ໘ ຢ່າງເຫຼົ່ານີ້

ຄຳວ່າ ນໍຣະຊົນບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ ອະທິບາຍວ່າ ບໍ່ເພິ່ງດຳເນີນໄປ ບໍ່ເພິ່ງມຸ້ງໝັ້ນ ບໍ່ເພິ່ງນຳໄປ ບໍ່ເພິ່ງພາ (ຕົນ) ໄປໃນຄວາມເປັນຄົນເວົ້າຕົວະ ຄື ເພິ່ງລະບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເປັນຄົນເວົ້າຕົວະ ໄດ້ແກ່ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມເປັນຄົນເວົ້າຕົວະມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ນໍຣະຊົນບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ

ຄຳວ່າ ບໍ່ເພິ່ງເຮັດຄວາມສະເນ່ຫາໃນຮູບ ອະທິບາຍວ່າ

ຄຳວ່າ ຮູບ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔

ຄຳວ່າ ບໍ່ເພິ່ງເຮັດຄວາມສະເນ່ຫາໃນຮູບ ອະທິບາຍວ່າ ບໍ່ເພິ່ງເຮັດຄວາມສະເນ່ຫາ ຄືບໍ່ເພິ່ງເຮັດຄວາມພໍໃຈ ບໍ່ເພິ່ງເຮັດຄວາມຮັກ ບໍ່ເພິ່ງເຮັດ ໄດ້ແກ່ ບໍ່ເພິ່ງໃຫ້ເກີດ ບໍ່ເພິ່ງໃຫ້ເກີດຂຶ້ນ ບໍ່ເພິ່ງໃຫ້ບັງເກີດ ບໍ່ເພິ່ງໃຫ້ບັງເກີດຂຶ້ນເຊິ່ງຄວາມກຳໜັດໃນຮູບ ລວມຄວາມວ່າ ບໍ່ເພິ່ງເຮັດຄວາມສະເນ່ຫາໃນຮູບ

## ວ່າດ້ວຍຄວາມຖືຕົວມີໄນຕ່າງ ໆ

ຄຳວ່າ ຄວາມຖືຕົວ ໃນຄຳວ່າ ເພິ່ງກຳນົດຮູ້ຄວາມຖືຕົວ ອະທິບາຍວ່າ ຄວາມຖືຕົວໄນດຽວ ຄື ຄວາມທີ່ຈິດໃຝ່ສູງ

ຄວາມຖືຕົວ ໒ ໄນ ຄື

໑. ການຍົກຕົນ
໒. ການຂົ່ມຜູ້ອື່ນ

ຄວາມຖືຕົວ ໓ ໄນ ຄື

໑. ຄວາມຖືຕົວວ່າ ເຮົາເລີດກວ່າເຂົາ
໒. ຄວາມຖືຕົວວ່າ ເຮົາສະເໝີເຂົາ
໓. ຄວາມຖືຕົວວ່າ ເຮົາດ້ອຍກວ່າເຂົາ

ຄວາມຖືຕົວ ໔ ໄນ ຄື

໑. ເກີດຄວາມຖືຕົວຍ້ອນລາບ
໒. ເກີດຄວາມຖືຕົວຍ້ອນຍົດ
໓. ເກີດຄວາມຖືຕົວຍ້ອນສັນເສີນ
໔. ເກີດຄວາມຖືຕົວຍ້ອນຄວາມສຸກ

ຄວາມຖືຕົວ ໕ ໄນ ຄື

໑. ເກີດຄວາມຖືຕົວວ່າເຮົາໄດ້ຮູບທີ່ຖືກໃຈ
໒. ເກີດຄວາມຖືຕົວວ່າເຮົາໄດ້ສຽງທີ່ຖືກໃຈ
໓. ເກີດຄວາມຖືຕົວວ່າເຮົາໄດ້ກິ່ນທີ່ຖືກໃຈ
໔. ເກີດຄວາມຖືຕົວວ່າເຮົາໄດ້ຣົດທີ່ຖືກໃຈ
໕. ເກີດຄວາມຖືຕົວວ່າເຮົາໄດ້ໂຜດຖັບພະທີ່ຖືກໃຈ

ຄວາມຖືຕົວ ໖ ໄນ ຄື

໑. ເກີດຄວາມຖືຕົວຍ້ອນມີຕາສົມບູນ
໒. ເກີດຄວາມຖືຕົວຍ້ອນມີຫູສົມບູນ
໓. ເກີດຄວາມຖືຕົວຍ້ອນມີດັງສົມບູນ
໔. ເກີດຄວາມຖືຕົວຍ້ອນມີລີ້ນສົມບູນ
໕. ເກີດຄວາມຖືຕົວຍ້ອນມີກາຍສົມບູນ
໖. ເກີດຄວາມຖືຕົວຍ້ອນມີໃຈສົມບູນ

ຄວາມຖືຕົວ ໗ ໄນ ຄື

໑. ຄວາມດູໝິ່ນ
໒. ຄວາມດູໝິ່ນດ້ວຍອຳນາດຄວາມຖືຕົວ
໓. ຄວາມຖືຕົວວ່າເຮົາດ້ອຍກວ່າເຂົາ

໔. ຄວາມຖືຕົວວ່າເຮົາສະເໝີເຂົາ
໕. ຄວາມຖືຕົວວ່າເຮົາເລີດກວ່າເຂົາ
໖. ຄວາມຖືເຮົາຖືເຂົາ
໗. ຄວາມຖືຕົວຜິດ ໆ

ຄວາມຖືຕົວ ໘ ໄນ ຄື

໑. ເກີດຄວາມຖືຕົວຍ້ອນໄດ້ລາບ
໒. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນເສື່ອມລາບ
໓. ເກີດຄວາມຖືຕົວຍ້ອນມີຍົດ
໔. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນເສື່ອມຍົດ
໕. ເກີດຄວາມຖືຕົວຍ້ອນສັນເສີນ
໖. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນຖືກນິນທາ
໗. ເກີດຄວາມຖືຕົວຍ້ອນຄວາມສຸກ
໘. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນຄວາມທຸກ

ຄວາມຖືຕົວ ໙ ໄນ ຄື

໑. ເປັນຜູ້ເລີດກວ່າເຂົາຖືຕົວວ່າເລີດກວ່າເຂົາ
໒. ເປັນຜູ້ເລີດກວ່າເຂົາຖືຕົວວ່າສະເໝີເຂົາ
໓. ເປັນຜູ້ເລີດກວ່າເຂົາຖືຕົວວ່າດ້ອຍກວ່າເຂົາ
໔. ເປັນຜູ້ສະເໝີເຂົາຖືຕົວວ່າເລີດກວ່າເຂົາ
໕. ເປັນຜູ້ສະເໝີເຂົາຖືຕົວວ່າສະເໝີເຂົາ
໖. ເປັນຜູ້ສະເໝີເຂົາຖືຕົວວ່າດ້ອຍກວ່າເຂົາ
໗. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າເລີດກວ່າເຂົາ
໘. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າສະເໝີເຂົາ
໙. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າດ້ອຍກວ່າເຂົາ

ຄວາມຖືຕົວ ໑໐ ໄນ ຄື ຄົນບາງຄົນໃນໂລກນີ້

໑. ເກີດຄວາມຖືຕົວຍ້ອນຊາດ
໒. ເກີດຄວາມຖືຕົວຍ້ອນໂຄດ ຯລຯ
(໑໐) ຯລຯ ຫຼື ເກີດຄວາມຖືຕົວ ຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວ

ຄວາມຖືຕົວ ກະຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫິ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງ ເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຖືຕົວ

ຄຳວ່າ ເພິ່ງກຳນົດຮູ້ຄວາມຖືຕົວ ອະທິບາຍວ່າ ເພິ່ງກຳນົດຮູ້ຄວາມຖືຕົວດ້ວຍປະຣິນຍາ ໓ ຄື

໑. ຍາຕະປະຣິນຍາ

໒. ຕີຣະນະປະຣິນຍາ

໓. ປະຫານະປະຣິນຍາ

ຍາຕະປະຣິນຍາ ເປັນແນວໃດ?

ຄື ນໍຣະຊົນຮູ້ຈັກຄວາມຖືຕົວ ຄື ຮູ້ເຫັນວ່າ ນີ້ຄວາມຖືຕົວໄນດຽວ ຄື ຄວາມທີ່ຈິດໃຝ່ສູງ ນີ້ຄວາມຖືຕົວ ໒ ໄນ ຄື (໑) ການຍົກຕົນ (໒) ການຂົ່ມຜູ້ອື່ນ ຯລຯ ນີ້ ຄວາມຖືຕົວ ໑໐ ໄນ ຄົນບາງຄົນໃນໂລກນີ້ (໑) ເກີດຄວາມຖືຕົວຍ້ອນຊາດ (໒) ເກີດຄວາມຖືຕົວ ຍ້ອນໂຄດ ຯລຯ (໑໐) ຯລຯ ຫຼື ເກີດຄວາມຖືຕົວຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວ ນີ້ຊື່ວ່າ ຍາຕະປະຣິນຍາ

ຕີຣະນະປະຣິນຍາ ເປັນແນວໃດ?

ຄື ນໍຣະຊົນທຳຄວາມຖືຕົວທີ່ຮູ້ແລ້ວໃຫ້ຜາກົດແນວນີ້ແລ້ວ ພິຈາລະນາຄວາມຖືຕົວໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ຯລຯ ເປັນຂອງທີ່ຕ້ອງສະລັດອອກໄປ ນີ້ຊື່ວ່າ ຕີຣະນະປະຣິນຍາ

ປະຫານະປະຣິນຍາ ເປັນແນວໃດ?

ຄື ນໍຣະຊົນເມື່ອພິຈາລະນາເຫັນແນວນີ້ແລ້ວ ຍ່ອມລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຖືຕົວ ນີ້ຊື່ວ່າປະຫານະປະຣິນຍາ

ຄຳວ່າ ເພິ່ງກຳນົດຮູ້ຄວາມຖືຕົວ ໄດ້ແກ່ ເພິ່ງກຳນົດຮູ້ຄວາມຖືຕົວດ້ວຍປະຣິນຍາ ໓ ເຫຼົ່ານີ້ ລວມຄວາມວ່າ ເພິ່ງກຳນົດຮູ້ຄວາມຖືຕົວ

ຄຳວ່າ ແລະເພິ່ງປະພຶດລະເວັ້ນຈາກຄວາມຮີບຟ້າວ ອະທິບາຍວ່າ

ຄວາມປະພຶດຮີບຟ້າວ ເປັນແນວໃດ?

ຄື ຄວາມປະພຶດດ້ວຍອຳນາດຣາຄະຂອງບຸກຄົນຜູ້ກຳໜັດ ຊື່ວ່າຄວາມປະພຶດ ຮີບຟ້າວ ຄວາມປະພຶດດ້ວຍອຳນາດໂທສະຂອງບຸກຄົນຜູ້ຂັດເຄືອງ ຊື່ວ່າຄວາມປະພຶດ ຮີບຟ້າວ ຄວາມປະພຶດດ້ວຍອຳນາດໂມຫະຂອງບຸກຄົນຜູ້ຫຼົງ ຊື່ວ່າຄວາມປະພຶດ ຮີບຟ້າວ ຄວາມປະພຶດດ້ວຍອຳນາດຄວາມຖືຕົວຂອງບຸກຄົນຜູ້ຍຶດຕິດ ຊື່ວ່າຄວາມປະພຶດຮີບຟ້າວ ຄວາມປະພຶດດ້ວຍອຳນາດທິດຖິຂອງບຸກຄົນຜູ້ຍຶດໝັ້ນທິດຖິ ຊື່ວ່າຄວາມປະພຶດຮີບຟ້າວ ຄວາມປະພຶດດ້ວຍອຳນາດອຸດທັດຈະຂອງບຸກຄົນຜູ້ຟຸ້ງຊ່ານ ຊື່ວ່າຄວາມປະພຶດຮີບຟ້າວ ຄວາມປະພຶດດ້ວຍອຳນາດວິຈິກິດສາຂອງ

ບຸກຄົນຜູ້ລັງເລ ຊື່ວ່າຄວາມປະພຶດຮີບຟ້າວ ຄວາມປະພຶດດ້ວຍອໍານາດອະນຸໄສຂອງບຸກຄົນຜູ້ຕົກໄປໃນກໍາລັງກິເລດ ຊື່ວ່າຄວາມປະພຶດຮີບຟ້າວ ນີ້ຊື່ວ່າຄວາມປະພຶດຮີບຟ້າວ

ຄໍາວ່າ ແລະເພິ່ງປະພຶດລະເວັ້ນຈາກຄວາມຮີບຟ້າວ ອະທິບາຍວ່າ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມປະພຶດຮີບຟ້າວ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ຄື ປະພຶດ ທ່ຽວໄປ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດໍາເນີນໄປ ຍັງຊີວິດໃຫ້ດໍາເນີນໄປ ລວມຄວາມວ່າ ແລະເພິ່ງປະພຶດລະເວັ້ນຈາກຄວາມຮີບຟ້າວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ນໍຣະຊົນບໍ່ເພິ່ງມຸ້ງໝັ້ນໃນຄວາມເປັນຄົນເວົ້າຕົວະ
ບໍ່ເພິ່ງເຮັດຄວາມສະເນ່ຫາໃນຮູບ ເພິ່ງກໍານົດຮູ້ຄວາມຖືຕົວ
ແລະເພິ່ງປະພຶດລະເວັ້ນຈາກຄວາມຮີບຟ້າວ

[໑໗໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ນໍຣະຊົນບໍ່ເພິ່ງຍິນດີສັງຂານເກົ່າ
ບໍ່ເພິ່ງເຮັດຄວາມພໍໃຈສັງຂານໃໝ່
ເມື່ອສັງຂານເສື່ອມໄປກໍບໍ່ເພິ່ງເສົ້າໂສກ
ບໍ່ເພິ່ງຕິດຢູ່ກັບກິເລດເຄື່ອງກ່ຽວຂ້ອງ

ຄໍາວ່າ ບໍ່ເພິ່ງຍິນດີສັງຂານເກົ່າ ອະທິບາຍວ່າ ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ເປັນອະດີດ ຕັດຮຽກວ່າ ສັງຂານເກົ່າ

ນໍຣະຊົນບໍ່ເພິ່ງຍິນດີ ຄືບໍ່ເພິ່ງຈົ່ມເຖິງ ບໍ່ເພິ່ງຕິດໃຈສັງຂານທີ່ເປັນອະດີດ ດ້ວຍອໍານາດຕັນຫາ ດ້ວຍອໍານາດທິດຖິ ຄື ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມຍິນດີ ຄວາມຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ລວມຄວາມວ່າ ບໍ່ເພິ່ງຍິນດີສັງຂານເກົ່າ

ຄໍາວ່າ ບໍ່ເພິ່ງເຮັດຄວາມພໍໃຈສັງຂານໃໝ່ ອະທິບາຍວ່າ ຮູບ ເວທະນາ ສັນຍາ ສັງ ຂານ ວິນຍານທີ່ເປັນປັດຈຸບັນ ຕັດຮຽກວ່າ ສັງຂານໃໝ່

ນໍຣະຊົນບໍ່ເພິ່ງເຮັດຄວາມພໍໃຈ ຄື ບໍ່ເພິ່ງທໍາ ຄວາມພໍໃຈ ບໍ່ເພິ່ງເຮັດຄວາມຮັກ ບໍ່ເພິ່ງເຮັດ ໄດ້ແກ່ ບໍ່ເພິ່ງໃຫ້ເກີດ ບໍ່ເພິ່ງໃຫ້ເກີດຂຶ້ນ ບໍ່ເພິ່ງໃຫ້ບັງເກີດ ບໍ່ເພິ່ງໃຫ້ບັງເກີດຂຶ້ນເຊິ່ງຄວາມກໍາໜັດ ໃນສັງຂານທີ່ເປັນປັດຈຸບັນດ້ວຍອໍານາດຕັນຫາ ດ້ວຍອໍານາດທິດຖິ ລວມຄວາມວ່າ ບໍ່ເພິ່ງເຮັດຄວາມພໍໃຈສັງຂານໃໝ່

ຄຳວ່າ ເມື່ອສັງຂານເສື່ອມໄປກໍບໍ່ເພິ່ງເສົ້າໂສກ ອະທິບາຍວ່າ ເມື່ອສັງຂານເສື່ອມໄປ ຄື ເສຍໄປ ລະໄປ ປ່ຽນໄປ ຫາຍໄປ ອັນຕະຣະທານຫາຍໄປ ບໍ່ເພິ່ງເສົ້າໂສກ ຄື ບໍ່ເພິ່ງລຳບາກ ບໍ່ເພິ່ງຍຶດໝັ້ນ ບໍ່ເພິ່ງຮ່ຳໄຮ ບໍ່ເພິ່ງຕີເອິກພ່ຳເພີ້ ບໍ່ເພິ່ງເຖິງຄວາມຫຼົງໃຫຼ ໄດ້ແກ່

ເມື່ອຕາເສື່ອມໄປ ຄື ເສຍໄປ ລະໄປ ປ່ຽນໄປ ຫາຍໄປ ອັນຕະຣະທານຫາຍໄປ

ເມື່ອຫູເສື່ອມໄປ ຄື ເສຍໄປ ລະໄປ ປ່ຽນໄປ ຫາຍໄປ ອັນຕະຣະທານຫາຍໄປ

ເມື່ອດັງ ຯລຯ ລີ້ນ ຯລຯ ກາຍ ຯລຯ ຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ຕະກູນ ຯລຯ ໝູ່ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ກໍບໍ່ເພິ່ງເສົ້າໂສກ ຄື ບໍ່ເພິ່ງລຳບາກ ບໍ່ເພິ່ງຍຶດໝັ້ນ ບໍ່ເພິ່ງຮ່ຳໄຮ ບໍ່ເພິ່ງຕີເອິກພ່ຳເພີ້ ບໍ່ເພິ່ງເຖິງຄວາມຫຼົງໃຫຼ ລວມຄວາມວ່າ ເມື່ອສັງຂານເສື່ອມໄປກໍບໍ່ເພິ່ງເສົ້າໂສກ

## ວ່າດ້ວຍກິເລດເຄື່ອງກ່ຽວຂ້ອງ

ຄຳວ່າ ບໍ່ເພິ່ງຕິດຢູ່ກັບກິເລດເຄື່ອງກ່ຽວຂ້ອງ ອະທິບາຍວ່າ ຕັນຫາຕັດຮຽກວ່າ ກິເລດເຄື່ອງກ່ຽວຂ້ອງ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນຄືໂລພະ

ຍ້ອນເຫດໃດ ຕັນຫາ ຈຶ່ງຕັດຮຽກວ່າ ກິເລດເຄື່ອງກ່ຽວຂ້ອງ ບຸກຄົນຍ່ອມ ກ່ຽວຂ້ອງ ຄື ກ່ຽວເກາະ ຖື ຍຶດໝັ້ນ ຖືໝັ້ນຮູບ ຍ່ອມກ່ຽວຂ້ອງ ຄື ກ່ຽວເກາະ ຖື ຍຶດໝັ້ນ ຖືໝັ້ນ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຄະຕິ ຯລຯ ການຖືກຳເນີດ ຯລຯ ປະຕິສົນທິ ຯລຯ ພົບ ຯລຯ ສົງສານ ຯລຯ ວັດຕະ ດ້ວຍຕັນຫາໃດ ຍ້ອນເຫດນັ້ນ ຕັນຫານັ້ນ ຈຶ່ງຕັດຮຽກວ່າ ກິເລດເຄື່ອງ ກ່ຽວຂ້ອງ

ຄຳວ່າ ບໍ່ເພິ່ງຕິດຢູ່ກັບກິເລດເຄື່ອງກ່ຽວຂ້ອງ ອະທິບາຍວ່າ ບໍ່ເພິ່ງຕິດຢູ່ກັບຕັນຫາ ຄື ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຕັນຫາ ໄດ້ແກ່ ເພິ່ງເປັນຜູ້ງົດງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຕັນຫາ ມີໃຈເປັນອິດສະຫຼະ(ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເພິ່ງຕິດຢູ່ກັບກິເລດເຄື່ອງກ່ຽວຂ້ອງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ນໍຣະຊົນບໍ່ເພິ່ງຍິນດີສັງຂານເກົ່າ
ບໍ່ເພິ່ງເຮັດຄວາມພໍໃຈສັງຂານໃໝ່
ເມື່ອສັງຂານເສື່ອມໄປກໍບໍ່ເພິ່ງເສົ້າໂສກ
ບໍ່ເພິ່ງຕິດຢູ່ກັບກິເລດເຄື່ອງກ່ຽວຂ້ອງ

[໑໗໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຮົາຮຽກຄວາມຕິດໃຈວ່າ ຫ້ວງນ້ຳໃຫຍ່
ຮຽກຄວາມໂລດແລ່ນວ່າ ຄວາມປາຖະໜາ
ຮຽກອາລົມວ່າ ຄວາມຫວັ່ນໄຫວ
ເປືອກຕົມຄືກາມເປັນສະພາວະທີ່ລຸລ່ວງໄປໄດ້ຍາກ

## ວ່າດ້ວຍຕັນຫາຕັດຮຽກວ່າຫ້ວງນ້ຳໃຫຍ່

ຄຳວ່າ ເຮົາຮຽກຄວາມຕິດໃຈວ່າ ຫ້ວງນ້ຳໃຫຍ່ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຕິດໃຈ ຄື ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາຕັດຮຽກວ່າ ຫ້ວງນ້ຳໃຫຍ່ ຄື ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ເຮົາຮຽກຄວາມຕິດໃຈວ່າ ຫ້ວງນ້ຳໃຫຍ່ ອະທິບາຍວ່າ ເຮົາຮຽກ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຄວາມຕິດໃຈວ່າ ເປັນຫ້ວງນ້ຳໃຫຍ່ ລວມຄວາມວ່າ ເຮົາຮຽກຄວາມຕິດໃຈວ່າ ຫ້ວງນ້ຳໃຫຍ່

ຄຳວ່າ ຮຽກຄວາມໂລດແລ່ນວ່າ ຄວາມປາຖະໜາ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມໂລດແລ່ນ ຄື ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາຕັດຮຽກວ່າ ຄວາມປາຖະໜາ ຄື ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ຮຽກຄວາມໂລດແລ່ນວ່າ ຄວາມປາຖະໜາ ອະທິບາຍວ່າ ຮຽກ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຄວາມໂລດແລ່ນວ່າ ເປັນຄວາມປາຖະໜາ ລວມຄວາມວ່າ ຮຽກຄວາມໂລດແລ່ນວ່າ ຄວາມປາຖະໜາ

ຄຳວ່າ ຮຽກອາລົມວ່າ ຄວາມຫວັ່ນໄຫວ ອະທິບາຍວ່າ ຕັນຫາຕັດຮຽກວ່າ ອາລົມ ຄື ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາຕັດຮຽກວ່າ ຄວາມຫວັ່ນໄຫວ ຄື ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ ລວມຄວາມວ່າ ຮຽກອາລົມວ່າ ຄວາມຫວັ່ນໄຫວ

ຄຳວ່າ ເປືອກຕົມ ຄື ກາມເປັນສະພາວະທີ່ລຸລ່ວງໄປໄດ້ຍາກ ອະທິບາຍວ່າ ເປືອກຕົມຄືກາມ ໄດ້ແກ່ ຫຼົ່ມ ຄື ກາມ ກິເລດ ຄື ກາມ ຕົມ ຄື ກາມ ຄວາມກັງວົນຄືກາມ ເປັນສະພາວະທີ່ລຸລ່ວງໄປໄດ້ຍາກ ຄື ກ້າວພົ້ນໄປໄດ້ຍາກ ຂ້າມໄປໄດ້ຍາກ ຂ້າມພົ້ນໄປໄດ້ຍາກ ກ້າວລ່ວງໄປໄດ້ຍາກ ລ່ວງເລີຍໄປໄດ້ຍາກ ລວມຄວາມວ່າ ເປືອກຕົມຄືກາມເປັນສະພາວະທີ່ລຸລ່ວງໄປໄດ້ຍາກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຮົາຮຽກຄວາມຕິດໃຈວ່າ ຫ້ວງນ້ຳໃຫຍ່
ຮຽກຄວາມໂລດແລ່ນວ່າ ຄວາມປາຖະໜາ
ຮຽກອາລົມວ່າ ຄວາມຫວັ່ນໄຫວ
ເປືອກຕົມ ຄື ການເປັນສະພາວະທີ່ລຸລ່ວງໄປໄດ້ຍາກ

[໑໗໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີບໍ່ກ້າວລ່ວງສັດຈະ ເປັນພາມດຳຣົງຢູ່ເທິງບົກ
ມຸນີສະລັດຖິ້ມສິ່ງທັງປວງໄດ້ແລ້ວ ມຸນີນັ້ນແລ ເຮົາຮຽກວ່າ ຜູ້ສະງົບ

ຄຳວ່າ ມຸນີບໍ່ກ້າວລ່ວງສັດຈະ ອະທິບາຍວ່າ ບໍ່ກ້າວລ່ວງວາຈາສັດ ບໍ່ກ້າວລ່ວງ ສຳມາທິດຖິ ບໍ່ກ້າວລ່ວງອະຣິຍະມັກມີອົງ ໘

ຄຳວ່າ ມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຜູ້ກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ ລວມຄວາມວ່າ ມຸນີບໍ່ກ້າວລ່ວງສັດຈະ

## ວ່າດ້ວຍອະມະຕະນິບພານຕັດຮຽກວ່າບົກ

ຄຳວ່າ ເປັນພາມດຳຣົງຢູ່ເທິງບົກ ອະທິບາຍວ່າ ອະມະຕະນິບພານຕັດຮຽກວ່າ ບົກ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ເປັນພາມ ອະທິບາຍວ່າ ທີ່ຊື່ວ່າເປັນພາມ ຍ້ອນລອຍທຳ ໗ ປະການໄດ້ແລ້ວ ຯລຯ ບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ ບັນດິດຮຽກຜູ້ນັ້ນວ່າ ເປັນພາມ

ຄຳວ່າ ເປັນພາມດຳຣົງຢູ່ເທິງບົກ ອະທິບາຍວ່າ ເປັນພາມດຳຣົງຢູ່ເທິງບົກ ຄື ດຳຣົງຢູ່ເທິງເກາະ ດຳຣົງຢູ່ໃນບ່ອນປ້ອງກັນ ດຳຣົງຢູ່ໃນບ່ອນຫຼົບຫຼີກ ດຳຣົງຢູ່ໃນບ່ອນເພິ່ງ ດຳຣົງຢູ່ໃນບ່ອນບໍ່ມີໄພ ດຳຣົງຢູ່ໃນບ່ອນບໍ່ຈຸຕິ ດຳຣົງຢູ່ໃນບ່ອນບໍ່ຕາຍ ດຳຣົງຢູ່ໃນນິບພານ ລວມຄວາມວ່າ ເປັນພາມດຳຣົງຢູ່ເທິງບົກ

ຄຳວ່າ ມຸນີສະລັດຖິ້ມສິ່ງທັງປວງໄດ້ແລ້ວ ອະທິບາຍວ່າ ອາຍະຕະນະ ໑໒ ຕັດຮຽກວ່າ ສິ່ງທັງປວງ ຄື ຕາແລະຮູບ ຯລຯ ໃຈແລະທຳມາຣົມ

ຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນອາຍະຕະນະທັງພາຍໃນແລະພາຍນອກ ມຸນີນັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດ້ວຍເຫດໃດ ແມ່ນດ້ວຍເຫດພຽງເທົ່ານີ້ ສິ່ງທັງປວງ

ເປັນສິ່ງທີ່ມຸນີນັ້ນສະລະ ຄາຍ ປ່ອຍ ລະ ສະລັດຖິ້ມໄດ້ແລ້ວ ຕັນຫາ ທິດຖິ ແລະມານະ ມຸນີນັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດ້ວຍເຫດໃດ ແມ່ນດ້ວຍເຫດພຽງເທົ່ານີ້ ສິ່ງທັງປວງເປັນສິ່ງທີ່ມຸນີນັ້ນສະລະ ຄາຍ ປ່ອຍ ລະ ສະລັດຖິ້ມໄດ້ແລ້ວ ປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະອາເນນຊາພິສັງຂານ ມຸນີນັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດ້ວຍເຫດໃດ ແມ່ນດ້ວຍເຫດພຽງເທົ່ານີ້ ສິ່ງທັງປວງເປັນສິ່ງທີ່ມຸນີນັ້ນ ສະລະ ຄາຍ ປ່ອຍ ລະ ສະລັດຖິ້ມໄດ້ແລ້ວ ລວມຄວາມວ່າ ມຸນີສະລັດຖິ້ມສິ່ງທັງປວງໄດ້ແລ້ວ

ຄຳວ່າ ມຸນີນັ້ນແລ ເຮົາຮຽກວ່າ ຜູ້ສະງົບ ອະທິບາຍວ່າ ມຸນີນັ້ນ ເຮົາຮຽກ ຄື ກ່າວບອກ ສະແດງ ຊີ້ແຈ່ງວ່າຜູ້ສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ສະງັດ ລວມຄວາມວ່າ ມຸນີນັ້ນແລ ເຮົາຮຽກວ່າ ຜູ້ສະງົບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີບໍ່ກ້າວລ່ວງສັດຈະ ເປັນພາມດຳຣົງຢູ່ເທິງບົກ
ມຸນີສະລັດຖິ້ມສິ່ງທັງປວງໄດ້ແລ້ວ ມຸນີນັ້ນແລ ເຮົາຮຽກວ່າ ຜູ້ສະງົບ

[໑໘໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີນັ້ນແລ ມີຄວາມຮູ້ ຈົບເວດ
ຮູ້ທຳແລ້ວກໍບໍ່ອາໄສ
ມຸນີນັ້ນຢູ່ໃນໂລກໂດຍຊອບ
ຍ່ອມບໍ່ໃຝ່ຫາໃຜ ໆ ໃນໂລກນີ້

ຄຳວ່າ ມີຄວາມຮູ້ ໃນຄຳວ່າ ມຸນີນັ້ນແລ ມີຄວາມຮູ້ ຈົບເວດ ອະທິບາຍວ່າ ມີຄວາມຮູ້ ຄື ເຖິງວິດຊາ ມີຍານ ມີປັນຍາເຄື່ອງຕັດສະຮູ້ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ຈົບເວດ ອະທິບາຍວ່າ ຍານໃນມັກ ໔ ຕັດຮຽກວ່າ ເວດ ຯລຯ ເປັນຜູ້ປາສະຈາກຣາຄະໃນເວທະນາທັງປວງ ກ້າວລ່ວງເວທະນາທັງປວງແລ້ວ ຊື່ວ່າຜູ້ຈົບເວດ ລວມຄວາມວ່າ ມຸນີນັ້ນແລມີຄວາມຮູ້ ຈົບເວດ

ຄຳວ່າ ຮູ້ແລ້ວ ໃນຄຳວ່າ ຮູ້ທຳແລ້ວກໍບໍ່ອາໄສ ໄດ້ແກ່ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວ ຄື ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ບໍ່ອາໄສ ໄດ້ແກ່ ຄວາມອາໄສ ໒ ຢ່າງ ຄື (໑) ຄວາມອາໄສດ້ວຍອຳນາດ ຕັນຫາ (໒) ຄວາມອາໄສດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດທິດຖິ

ມຸນີລະຄວາມອາໄສດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມອາໄສດ້ວຍອຳນາດທິດຖິໄດ້ແລ້ວ ບໍ່ອາໄສຕາ ບໍ່ອາໄສຫູ ຯລຯ ບໍ່ອາໄສດັງ ຯລຯ ບໍ່ອາໄສ ຄື ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ບໍ່ຕິດໃຈແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງກັບຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມ ທີ່ເພິ່ງຮູ້ແຈ້ງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ຮູ້ທຳແລ້ວກໍບໍ່ອາໄສ

ຄຳວ່າ ມຸນີນັ້ນຢູ່ໃນໂລກໂດຍຊອບ ອະທິບາຍວ່າ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນອາຍະຕະນະທັງພາຍໃນ ແລະ ພາຍນອກ ມຸນີລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປ ບໍ່ໄດ້ດ້ວຍເຫດໃດ ແມ່ນດ້ວຍເຫດພຽງເທົ່ານີ້ ມຸນີຊື່ວ່າທ່ຽວໄປ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປໃນໂລກໂດຍຊອບ ຯລຯ

ປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະອາເນນຊາພິສັງຂານ ມຸນີລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ດ້ວຍເຫດໃດ ແມ່ນດ້ວຍເຫດພຽງເທົ່ານີ້ ມຸນີຊື່ວ່າ ທ່ຽວໄປຢູ່ ເຄື່ອນໄຫວເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປໃນໂລກໂດຍຊອບ ລວມຄວາມວ່າ ມຸນີນັ້ນຢູ່ໃນໂລກໂດຍຊອບ

ຄຳວ່າ ຍ່ອມບໍ່ໃຝ່ຫາໃຜ ໆ ໃນໂລກນີ້ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມໃຝ່ຫາ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາທີ່ຕັດຮຽກວ່າ ຄວາມໃຝ່ຫານີ້ ມຸນີໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ມຸນີນັ້ນຍ່ອມບໍ່ໃຝ່ຫາໃຜ ໆ ຄື ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດ ລວມຄວາມວ່າ ຍ່ອມບໍ່ໃຝ່ຫາໃຜ ໆ ໃນໂລກນີ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີນັ້ນແລມີຄວາມຮູ້ ຈົບເວດ
ຮູ້ທຳແລ້ວກໍບໍ່ອາໄສ
ມຸນີນັ້ນຢູ່ໃນໂລກໂດຍຊອບ
ຍ່ອມບໍ່ໃຝ່ຫາໃຜ ໆ ໃນໂລກນີ້

[໑໗໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຜູ້ໃດຂ້າມກາມແລະເຄື່ອງຂ້ອງທີ່ລ່ວງໄດ້ຍາກໃນໂລກໄດ້ແລ້ວ
ຜູ້ນັ້ນຍ່ອມບໍ່ເສົ້າໂສກ ບໍ່ລະໂມບ
ເປັນຜູ້ຕັດກະແສໄດ້ແລ້ວ ບໍ່ມີເຄື່ອງຜູກ

## ວ່າດ້ວຍກາມ ໒ ຢ່າງ

ຄຳວ່າ ຜູ້ໃດ ໃນຄຳວ່າ ຜູ້ໃດຂ້າມກາມແລະເຄື່ອງຂ້ອງທີ່ລ່ວງໄດ້ຍາກໃນໂລກໄດ້ແລ້ວ ໄດ້ແກ່ ຜູ້ໃດ ຄື ຜູ້ເຊັ່ນໃດ ຜູ້ຂວນຂວາຍແນວໃດ ຜູ້ຕັ້ງໃຈແນວໃດ ຜູ້ມີປະການແນວໃດ ຜູ້ເຖິງຖານະໃດ ຜູ້ປະກອບດ້ວຍທຳໃດ ຈະເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດກໍຕາມ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ເຄື່ອງຂ້ອງ ໄດ້ແກ່ ເຄື່ອງຂ້ອງ ໗ ຢ່າງ ຄື

໑. ເຄື່ອງຂ້ອງ ຄື ຣາຄະ
໒. ເຄື່ອງຂ້ອງ ຄື ໂທສະ
໓. ເຄື່ອງຂ້ອງ ຄື ໂມຫະ
໔. ເຄື່ອງຂ້ອງ ຄື ມານະ
໕. ເຄື່ອງຂ້ອງ ຄື ທິດຖິ
໖. ເຄື່ອງຂ້ອງ ຄື ກິເລດ
໗. ເຄື່ອງຂ້ອງ ຄື ທຸດຈະຣິດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ

ຄຳວ່າ ແລະເຄື່ອງຂ້ອງທີ່ລ່ວງໄດ້ຍາກໃນໂລກ ອະທິບາຍວ່າ ຜູ້ໃດ ຂ້າມໄດ້ແລ້ວ ຄື ຂ້າມໄປໄດ້ແລ້ວ ຂ້າມພົ້ນໄດ້ແລ້ວ ກ້າວລ່ວງແລ້ວ ລ່ວງເລີຍແລ້ວ ເຊິ່ງກາມ ແລະເຄື່ອງຂ້ອງທີ່ລະໄດ້ຍາກ ຄື ປະພຶດລ່ວງໄດ້ຍາກ ກ້າວຂ້າມໄດ້ຍາກ ກ້າວພົ້ນໄດ້ຍາກ ກ້າວລ່ວງໄດ້ຍາກ ປະພຶດລ່ວງໄດ້ຍາກໃນໂລກແລ້ວ ລວມຄວາມວ່າ ຜູ້ໃດຂ້າມກາມແລະເຄື່ອງຂ້ອງທີ່ລ່ວງໄດ້ຍາກໃນໂລກໄດ້ແລ້ວ

ຄຳວ່າ ຜູ້ນັ້ນຍ່ອມບໍ່ເສົ້າໂສກ ບໍ່ລະໂມບ ອະທິບາຍວ່າ ຍ່ອມບໍ່ເສົ້າໂສກເຖິງສິ່ງທີ່ຜັນປ່ຽນໄປ ຫຼືເມື່ອສິ່ງນັ້ນຜັນປ່ຽນໄປ ຍ່ອມບໍ່ເສົ້າໂສກ ຄື ຍ່ອມບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຕາຂອງເຮົາຜັນປ່ຽນໄປ ບໍ່ເສົ້າໂສກ ຄື ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຫູຂອງເຮົາ ຯລຯ ດັງຂອງເຮົາ ຯລຯ ລີ້ນຂອງເຮົາ ຯລຯ ກາຍຂອງເຮົາ ຯລຯ ຮູບຂອງເຮົາ ຯລຯ ສຽງຂອງເຮົາ ຯລຯ ກິ່ນຂອງເຮົາ ຯລຯ ຣົດ

ຂອງເຮົາ ຯລຯ ໂຜດຖັບພະຂອງເຮົາ ຯລຯ ຕະກູນຂອງເຮົາ ຯລຯ ໝູ່ຄະນະຂອງເຮົາ ຯລຯ ອາວາດຂອງເຮົາ ຯລຯ ລາບຂອງເຮົາ ຯລຯ ຍົດຂອງເຮົາ ຯລຯ ສັນເສີນຂອງເຮົາ ຯລຯ ຄວາມສຸກຂອງເຮົາ ຯລຯ ຈີວອນຂອງເຮົາ ຯລຯ ບິນທະບາດຂອງເຮົາ ຯລຯ ເສນາສະນະຂອງເຮົາ ຯລຯ ຄິລານະປັດໄຈເພສັດບໍຣິຂານຂອງເຮົາ ຯລຯ ມານດາຂອງເຮົາ ຯລຯ ບິດາຂອງເຮົາ ຯລຯ ອ້າຍນ້ອງຊາຍຂອງເຮົາ ຯລຯ ເອື້ອຍນ້ອງສາວຂອງເຮົາ ຯລຯ ບຸດຂອງເຮົາ ຯລຯ ທິດາຂອງເຮົາ ຯລຯ ມິດຂອງເຮົາ ຯລຯ ອຳມາດຂອງເຮົາ ຯລຯ ຍາດພີ່ນ້ອງແລະຜູ້ຮ່ວມສາຍໂລຫິດຂອງເຮົາຜັນປ່ຽນໄປ ລວມຄວາມວ່າ ບໍ່ເສົ້າໂສກ

ຄຳວ່າ ບໍ່ລະໂມບ ໄດ້ແກ່ ບໍ່ລະໂມບ ຄື ບໍ່ມຸ້ງຫວັງ ບໍ່ເຂົ້າໄປເພ່ງ ບໍ່ເພ່ງເຖິງ ບໍ່ເພ່ງເລັງເຖິງ ອີກໄນໜຶ່ງ ຜູ້ນັ້ນ ຍ່ອມບໍ່ເກີດ ບໍ່ແກ່ ບໍ່ຕາຍ ບໍ່ຈຸຕິ ບໍ່ຕ້ອງເຂົ້າເຖິງກຳເນີດ ຈຶ່ງຊື່ວ່າບໍ່ລະໂມບ ລວມຄວາມວ່າ ຜູ້ນັ້ນຍ່ອມບໍ່ເສົ້າໂສກ ບໍ່ລະໂມບ

## ວ່າດ້ວຍຕັນຫາຕັດຮຽກວ່າກະແສ

ຄຳວ່າ ເປັນຜູ້ຕັດກະແສໄດ້ແລ້ວ ບໍ່ມີເຄື່ອງຜູກ ອະທິບາຍວ່າ ຕັນຫາຕັດຮຽກວ່າ ກະແສ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາທີ່ຕັດຮຽກວ່າ ກະແສນີ້ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ເປັນຜູ້ຕັດກະແສໄດ້ແລ້ວ

ຄຳວ່າ ບໍ່ມີເຄື່ອງຜູກ ໄດ້ແກ່ ເຄື່ອງຜູກ ໗ ຢ່າງ ຄື

໑. ເຄື່ອງຜູກ ຄື ຣາຄະ
໒. ເຄື່ອງຜູກ ຄື ໂທສະ
໓. ເຄື່ອງຜູກ ຄື ໂມຫະ
໔. ເຄື່ອງຜູກ ຄື ມານະ
໕. ເຄື່ອງຜູກ ຄື ທິດຖິ
໖. ເຄື່ອງຜູກ ຄື ກິເລດ
໗. ເຄື່ອງຜູກ ຄື ທຸດຈະຣິດ

ເຄື່ອງຜູກເຫຼົ່ານີ້ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ບໍ່ມີເຄື່ອງຜູກ ລວມຄວາມວ່າ ເປັນຜູ້ຕັດກະແສໄດ້ແລ້ວ ບໍ່ມີເຄື່ອງຜູກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ

ຜູ້ໃດຂ້າມກາມແລະເຄື່ອງຂ້ອງທີ່ລ່ວງໄດ້ຍາກໃນໂລກໄດ້ແລ້ວ
ຜູ້ນັ້ນຍ່ອມບໍ່ເສົ້າໂສກ ບໍ່ລະໂມບ
ເປັນຜູ້ຕັດກະແສໄດ້ແລ້ວ ບໍ່ມີເຄື່ອງຜູກ

[໑໗໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ທ່ານຈົ່ງເຮັດກິເລດທີ່ພາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ
ເຄື່ອງກັງວົນທີ່ພາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ
ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້
ກໍຈັກເປັນຜູ້ເຂົ້າໄປສະງົບທ່ຽວໄປຢູ່

ຄຳວ່າ ທ່ານຈົ່ງເຮັດກິເລດທີ່ພາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ ອະທິບາຍວ່າ ກິເລດເຫຼົ່າໃດເພິ່ງພາຣົບສັງຂານທີ່ເປັນອະດີດເກີດຂຶ້ນ ທ່ານຈົ່ງໃຫ້ກິເລດເຫຼົ່ານັ້ນແຫ້ງໄປ ເຫືອດແຫ້ງໄປ ຄື ແຫ້ງເຫືອດໄປ ແຫ້ງຫາຍໄປ ເຮັດໃຫ້ໝົດພິດພັນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ລວມຄວາມວ່າ ທ່ານຈົ່ງເຮັດກິເລດທີ່ພາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ ແນວນີ້ແດ່

ອີກໄນໜຶ່ງ ກຳມາພິສັງຂານທີ່ເປັນອະດີດເຊິ່ງຍັງບໍ່ໃຫ້ຜົນເຫຼົ່າໃດ ທ່ານຈົ່ງເຮັດ ກຳມາພິສັງຂານເຫຼົ່ານັ້ນໃຫ້ແຫ້ງໄປ ເຫືອດແຫ້ງໄປ ຄື ແຫ້ງເຫືອດໄປ ແຫ້ງຫາຍໄປ ເຮັດໃຫ້ໝົດພິດພັນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ລວມຄວາມວ່າ ທ່ານຈົ່ງເຮັດກິເລດທີ່ພາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ ແນວນີ້ແດ່

## ວ່າດ້ວຍອະນາຄົດຕັດຮຽກວ່າສ່ວນພາຍຫຼັງ

ຄຳວ່າ ເຄື່ອງກັງວົນທີ່ພາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ ອະທິບາຍ ວ່າ ອະນາຄົດ ຕັດຮຽກວ່າ ສ່ວນພາຍຫຼັງ

ເຄື່ອງກັງວົນເຫຼົ່າໃດເພິ່ງພາຣົບສັງຂານໃນອະນາຄົດເກີດຂຶ້ນ ໄດ້ແກ່ ເຄື່ອງກັງວົນ ຄື ຣາຄະ ເຄື່ອງກັງວົນ ຄື ໂທສະ ເຄື່ອງກັງວົນ ຄື ໂມຫະ ເຄື່ອງກັງວົນ ຄື ມານະ ເຄື່ອງກັງວົນ ຄື ທິດຖິ ເຄື່ອງກັງວົນ ຄື ກິເລດ ເຄື່ອງກັງວົນ ຄື ທຸດຈະຣິດ

ເຄື່ອງກັງວົນເຫຼົ່ານີ້ຢ່າໄດ້ມີແກ່ທ່ານ ຄື ທ່ານຢ່າເຮັດໃຫ້ພາກົດ ຢ່າໃຫ້ເກີດ ຢ່າໃຫ້ເກີດຂຶ້ນ ຢ່າໃຫ້ບັງເກີດ ຢ່າໃຫ້ບັງເກີດຂຶ້ນ ໄດ້ແກ່ ຈົ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ລວມຄວາມວ່າ ເຄື່ອງກັງວົນທີ່ພາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີ ແກ່ທ່ານ

ຄຳວ່າ ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້ ອະທິບາຍວ່າ ຣູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ເປັນປັດຈຸບັນ ຕັດຮຽກວ່າ ສ່ວນທ່າມກາງ

ທ່ານຈັກບໍ່ຖື ຄື ບໍ່ຍຶດ ບໍ່ຖື ບໍ່ຍຶດຖື ບໍ່ໃຍດີ ບໍ່ເວົ້າເຖິງ ບໍ່ພໍໃຈສັງຂານທີ່ເປັນປັດຈຸບັນ ດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິ ຄື ຈັກລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມ

ບໍ່ມີອີກເຊິ່ງຄວາມຍິນດີ ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ລວມຄວາມວ່າ ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້

ຄຳວ່າ ກໍຈັກເປັນຜູ້ເຂົ້າໄປສະງົບທ່ຽວໄປ ອະທິບາຍວ່າ

ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບຣາຄະ ຯລຯ

ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບໂທສະ ຯລຯ

ຊື່ວ່າເປັນຜູ້ສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ຣະງັບໄດ້ແລ້ວ ຍ້ອນສະງົບ ຣະງັບ ເຂົ້າໄປຣະງັບ ສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບຣະງັບອະກຸສະລາພິສັງຂານທຸກ ປະເພດໄດ້ແລ້ວ ຈັກທ່ຽວໄປ ຄື ຈັກຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ ດຳເນີນໄປ ລວມຄວາມວ່າ ກໍຈັກເປັນຜູ້ເຂົ້າໄປສະງົບທ່ຽວໄປ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກ ເຈົ້າຈຶ່ງຕັດວ່າ

ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ
ເຄື່ອງກັງວົນທີ່ຜາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ
ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້
ກໍຈັກເປັນຜູ້ເຂົ້າໄປສະງົບທ່ຽວໄປ

[໑໙໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ຄວາມຍຶດຖືວ່າເປັນຂອງເຮົາໃນນາມຮູບ
ຍ່ອມບໍ່ມີແກ່ຜູ້ໃດໂດຍປະການທັງປວງ
ແລະຜູ້ໃດບໍ່ເສົ້າໂສກ ຍ້ອນບໍ່ມີຄວາມຍຶດຖືວ່າເປັນຂອງເຮົາ
ຜູ້ນັ້ນແລຍ່ອມບໍ່ເສື່ອມໃນໂລກ

## ວ່າດ້ວຍນາມຮູບ

ຄຳວ່າ ໂດຍປະການທັງປວງ ໃນຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາໃນນາມຮູບ ຍ່ອມ ບໍ່ມີແກ່ຜູ້ໃດໂດຍປະການທັງປວງ ໄດ້ແກ່ ທຸກສິ່ງ ໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີ ເຫຼືອໂດຍປະການທັງປວງ ຄຳວ່າ ໂດຍປະການທັງປວງ ນີ້ ເປັນຄຳກ່າວ ລວມ ໆ ໄວ້ທັງໝົດ ອະຮູບປະຂັນ ໔ ຊື່ວ່ານາມ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔ ຊື່ວ່າຮູບ

ຄຳວ່າ ຜູ້ໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍ

ອຳນາດທິດຖິ ໆລໆ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ໆລໆ ນີ້ຊື່ວ່າ ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ

ຄຳວ່າ ຄວາມຍຶດຖືວ່າ ເປັນຂອງເຮົາໃນນາມຮູບຍ່ອມບໍ່ມີແກ່ຜູ້ໃດໂດຍປະການທັງປວງ ອະທິບາຍວ່າ ຄວາມຍຶດຖືວ່າເປັນຂອງເຮົາໃນນາມຮູບ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ຜູ້ໃດ ໂດຍປະການທັງປວງ ຄື ຄວາມຍຶດຖືວ່າເປັນຂອງເຮົາໃນນາມຮູບ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ຄວາມຍຶດຖືວ່າເປັນຂອງເຮົາໃນນາມຮູບ ຍ່ອມບໍ່ມີແກ່ຜູ້ໃດໂດຍປະການທັງປວງ

## ວ່າດ້ວຍຜູ້ບໍ່ເສົ້າໂສກ

ຄຳວ່າ ແລະຜູ້ໃດບໍ່ເສົ້າໂສກຍ້ອນບໍ່ມີຄວາມຍຶດຖືວ່າເປັນຂອງເຮົາ ອະທິບາຍວ່າ ບໍ່ເສົ້າ ໂສກເຖິງສິ່ງທີ່ຜັນປ່ຽນໄປ ຫຼືເມື່ອສິ່ງນັ້ນຜັນປ່ຽນໄປແລ້ວກໍບໍ່ເສົ້າໂສກ ຄື ບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຕາຂອງເຮົາ ຜັນປ່ຽນໄປ ບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຫູຂອງເຮົາ ໆລໆ ດັງຂອງເຮົາ ໆລໆ ລີ້ນຂອງ ເຮົາ ໆລໆ ກາຍຂອງເຮົາ ໆລໆ ຮູບຂອງເຮົາ ໆລໆ ສຽງຂອງເຮົາ ໆລໆ ກິ່ນຂອງເຮົາ ໆລໆ ຣົດຂອງເຮົາ ໆລໆ ໂຜດຖັບພະຂອງເຮົາ ໆລໆ ຕະກູນຂອງເຮົາ ໆລໆ ໝູ່ຄະນະຂອງເຮົາ ໆລໆ ອາວາດຂອງເຮົາ ໆລໆ ລາບຂອງເຮົາ ໆລໆ ຍາດພີ່ນ້ອງ ແລະຜູ້ຮ່ວມສາຍໂລຫິດຂອງ ເຮົາຜັນປ່ຽນໄປ ລວມຄວາມວ່າ ແລະຜູ້ໃດບໍ່ເສົ້າໂສກຍ້ອນບໍ່ມີຄວາມຍຶດຖືວ່າເປັນຂອງເຮົາ ແນວນີ້ແດ່

ອີກໄນໜຶ່ງ ຜູ້ຖືກທຸກຂະເວທະນາອັນບໍ່ສຳຣານກະທົບ ຄອບງຳ ຍ່ຳຍີ ມາເຖິງແລ້ວກໍບໍ່ ເສົ້າໂສກ ຄື ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼ ລວມຄວາມວ່າ ແລະຜູ້ໃດ ບໍ່ເສົ້າໂສກຍ້ອນບໍ່ມີຄວາມຍຶດຖືວ່າເປັນຂອງເຮົາ ແນວນີ້ແດ່

ອີກໄນໜຶ່ງ ຜູ້ຖືກໂຣກຕາກະທົບ ຄອບງຳ ໆລໆ ຖືກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ກະທົບ ຄອບງຳ ຍ່ຳຍີ ມາເຖິງແລ້ວ ກໍບໍ່ເສົ້າໂສກ ຄື ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ ເຖິງຄວາມຫຼົງໃຫຼ ລວມຄວາມວ່າ ແລະຜູ້ໃດບໍ່ເສົ້າໂສກຍ້ອນບໍ່ມີຄວາມຍຶດຖືວ່າເປັນຂອງເຮົາ ແນວນີ້ແດ່

ອີກໄນໜຶ່ງ ເມື່ອນາມຮູບບໍ່ມີ ບໍ່ຜາກົດ ຫາບໍ່ໄດ້ ກໍບໍ່ເສົ້າໂສກ ຄື ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ນາມຮູບໄດ້ມີແກ່ເຮົາແລ້ວນໍ ນາມຮູບນັ້ນບໍ່ມີແກ່ເຮົານໍ ນາມ ຮູບເພິ່ງມີແກ່ເຮົານໍ ເຮົາບໍ່ໄດ້ນາມຮູບນັ້ນນໍ ລວມຄວາມວ່າ ແລະຜູ້ໃດບໍ່ເສົ້າໂສກຍ້ອນບໍ່ມີຄວາມ ຍຶດຖືວ່າເປັນຂອງເຮົາ ແນວນີ້ແດ່

## ວ່າດ້ວຍຄວາມເສື່ອມມີແກ່ຜູ້ຢຶດຖື

ຄຳວ່າ ຜູ້ນັ້ນແລຍ່ອມບໍ່ເສື່ອມໃນໂລກ ອະທິບາຍວ່າ ຜູ້ໃດມີຄວາມຖື ຄວາມຢຶດໝັ້ນ ຄວາມຖືໝັ້ນ ຄວາມຕິດໃຈ ຄວາມນ້ອມໃຈເຊື່ອຮູບ ເວທະນາ ສັນຍາ ສັງຂານ ວິນຍານໃດ ໆ ວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຜູ້ນັ້ນຍ່ອມມີຄວາມເສື່ອມ ສົມຈິງດັ່ງພາສິດນີ້ວ່າ

ທ່ານເສື່ອມແລ້ວຈາກລົດ ມ້າ ແກ້ວມະນີ ແລະຕຸ້ມຫູ
ເສື່ອມແລ້ວຈາກບຸດພັນລະຍາ ແລະ ໂພຄະຊັບທີ່ຍັງບໍ່ໄດ້ໃຊ້ສອຍທັງປວງ
ເຫດໃດ ທ່ານຈຶ່ງບໍ່ເດືອດຮ້ອນ ໃນເວລາເສົ້າໂສກ
ໂພຄະຊັບຍ່ອມລະບຸກຄົນໄປກ່ອນແດ່
ບຸກຄົນຍ່ອມລະໂພຄະຊັບໄປກ່ອນແດ່
ໂຈນຣາຊາຜູ້ຕ້ອງການການ
ໝູ່ຊົນຜູ້ມີໂພຄະຊັບ ເປັນຜູ້ບໍ່ທ່ຽງ
ຍ້ອນແນວນັ້ນ ເຮົາຈຶ່ງບໍ່ເສົ້າໂສກໃນເວລາເສົ້າໂສກ
ດວງຈັນຂຶ້ນເຕັມດວງແລ້ວກໍລັບໄປ
ດວງອາທິດກຳຈັດຄວາມມືດແລ້ວກໍລັບໄປ
ສັດຕູເອີຍເຮົາຮູ້ຈັກໂລກກະທຳແລ້ວ
ຍ້ອນແນວນັ້ນ ເຮົາຈຶ່ງບໍ່ເສົ້າໂສກ ໃນເວລາທີ່ເສົ້າໂສກ

ຜູ້ໃດບໍ່ມີຄວາມຖື ຄວາມຢຶດໝັ້ນ ຄວາມຖືໝັ້ນ ຄວາມພໍໃຈ ຄວາມນ້ອມໃຈເຊື່ອ ຮູບ ເວທະນາ ສັນຍາ ສັງຂານ ວິນຍານໃດ ໆ ວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຜູ້ນັ້ນຍ່ອມບໍ່ມີຄວາມເສື່ອມ

ສົມຈິງດັ່ງພາສິດນີ້ວ່າ ສະມະນະ ທ່ານຍິນດີບໍ ເຮົາໄດ້ອັນໃດມາຈຶ່ງຍິນດີນໍ ຜູ້ມີອາຍຸ ຖ້າແນວນັ້ນ ທ່ານເສົ້າໂສກບໍ ສະມະນະ ເຮົາເສຍອັນໃດໄປນໍ ຜູ້ມີອາຍຸ ຖ້າແນວນັ້ນ ທ່ານທັງບໍ່ຍິນດີ ແລະບໍ່ເສົ້າໂສກບໍ ສະມະນະ ແນວນັ້ນ ຜູ້ມີອາຍຸ ເປັນເວລານານແທ້ນໍ ພວກເຮົາຈຶ່ງໄດ້ພົບພິກຂຸຜູ້ເປັນພາມ ຜູ້ດັບກິເລດ ບໍ່ຍິນດີ ບໍ່ມີທຸກ ຂ້າມຕັນຫາເຄື່ອງກ່ຽວຂ້ອງໃນໂລກລວມ ຄວາມວ່າ ຜູ້ນັ້ນແລ ຍ່ອມບໍ່ເສື່ອມໃນໂລກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຄວາມຢຶດຖືວ່າເປັນຂອງເຮົາໃນນາມຮູບ
ຍ່ອມບໍ່ມີແກ່ຜູ້ໃດໂດຍປະການທັງປວງ
ແລະຜູ້ໃດບໍ່ເສົ້າໂສກ ຍ້ອນບໍ່ມີຄວາມຢຶດຖືວ່າເປັນຂອງເຮົາ
ຜູ້ນັ້ນແລຍ່ອມບໍ່ເສື່ອມໃນໂລກ

[໑໗໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ
ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ
ຜູ້ນັ້ນເມື່ອບໍ່ໄດ້ຄວາມຍຶດຖືວ່າເປັນຂອງເຮົາ
ຍ່ອມບໍ່ເສົ້າໂສກວ່າຂອງ ໆ ເຮົາບໍ່ມີ

ຄຳວ່າ ຜູ້ໃດ ໃນຄຳວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ ອະທິບາຍວ່າ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ຄວາມພໍໃຈ ຄວາມນ້ອມໃຈເຊື່ອຮູບ ເວທະນາ ສັນຍາ ສັງຂານ ວິນຍານໃດ ໆ ວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ພຣະອະຣະຫັນຕະຂີນາສົບໃດ ໄດ້ແກ່ ກິເລດເຄື່ອງກັງວົນນັ້ນພຣະອະຣະຫັນຕະຂີນາສົບໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ ແນວນີ້ແດ່

## ວ່າດ້ວຍອິທັບປັດຈະຍະຕາ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ກາຍນີ້ ບໍ່ແມ່ນຂອງພວກທ່ານ ທັງບໍ່ແມ່ນຂອງຄົນອື່ນ ພິກຂຸທັງຫຼາຍ ກາຍນີ້ກຳເກົ່າຄວບຄຸມໄວ້ ຈິດປະມວນໄວ້ ເພິ່ງເຫັນວ່າ ເປັນບ່ອນຕັ້ງແຫ່ງເວທະນາ ພິກຂຸທັງຫຼາຍ ພຣະອະຣິຍະສາວົກ ຜູ້ໄດ້ຮຽນຮູ້ແລ້ວ ຍ່ອມມະນະສິການປະຕິດຈະສະມຸບບາດຢ່າງດີ ໂດຍແຍບຄາຍໃນກາຍນັ້ນວ່າ ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ຍ້ອນສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບໄປ ສິ່ງນີ້ຈຶ່ງດັບໄປ ຄື ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນັ້ນມີໄດ້ດ້ວຍປະການແນວນີ້

ຍ້ອນອະວິດຊາສຳຣອກດັບໄປບໍ່ເຫຼືອ ສັງຂານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການແນວນີ້ ລວມຄວາມວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນຍ່ອມບໍ່ມີແກ່ຜູ້ໃດ ແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ໂມຄະຣາດ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ
ເປັນຜູ້ມີສະຕິທຸກເມື່ອ ເພິ່ງຖອນຄວາມຕາມເຫັນວ່າມີຕົວຕົນສາ
ເປັນຜູ້ຂ້າມມັດຈຸຣາດສາໄດ້ ດ້ວຍອາການແນວນີ້
ບຸກຄົນພິຈາລະນາໂລກຢູ່ແນວນີ້ ມັດຈຸຣາດຈຶ່ງແນມບໍ່ເຫັນ

ລວມຄວາມວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ ແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສິ່ງໃດບໍ່ແມ່ນຂອງພວກທ່ານ ທ່ານທັງຫຼາຍຈົ່ງລະສິ່ງນັ້ນສາເທີ້ນ ສິ່ງທີ່ພວກທ່ານລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ ຕະຫຼອດການນານ ພິກຂຸທັງຫຼາຍ ອັນໃດນໍ? ບໍ່ແມ່ນຂອງພວກທ່ານ ພິກຂຸທັງຫຼາຍ ຮູບບໍ່ແມ່ນຂອງພວກທ່ານ ທ່ານທັງຫຼາຍຈົ່ງລະຮູບນັ້ນສາເທີ້ນ ຮູບທີ່ພວກທ່ານລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ ຕະຫຼອດການນານ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານບໍ່ແມ່ນຂອງພວກທ່ານ ທ່ານທັງຫຼາຍຈົ່ງລະວິນຍານນັ້ນສາເທີ້ນ ວິນຍານທີ່ພວກທ່ານລະໄດ້ແລ້ວນັ້ນແລ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ ຕະຫຼອດການນານ ພິກຂຸທັງຫຼາຍ ພວກທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄົນເພິ່ງເອົາຫຍ້າ ໄມ້ ງ່າໄມ້ ໃບໄມ້ທີ່ມີຢູ່ໃນເຊຕະວັນ ວິຫານນີ້ໄປເຜົາ ຫຼື ຈັດການໄປຕາມຮູບເລື້ອງ ພວກທ່ານຈະເພິ່ງມີຄວາມຄິດແນວນີ້ແດ່ບໍ ວ່າ ຄົນຍ່ອມເອົາພວກເຮົາໄປເຜົາ ຫຼື ຈັດການໄປຕາມ ຮູບການ

ຄວາມດຳຣິເຊັ່ນນັ້ນບໍ່ມີເລີຍ ຂ້ານ້ອຍ

ຂໍ້ນັ້ນ ເປັນຍ້ອນເຫດໃດ?

ຍ້ອນນັ້ນບໍ່ແມ່ນຕົນ ຫຼື ຂອງເນື່ອງດ້ວຍຕົນຂອງພວກຂ້າພຣະອົງເລີຍ ຂ້ານ້ອຍ

ແນວດຽວກັນນັ້ນແລ ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງພວກທ່ານ ທ່ານທັງຫຼາຍຈົ່ງລະສິ່ງນັ້ນສາ ສິ່ງທີ່ພວກທ່ານລະໄດ້ແລ້ວນັ້ນຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ ຕະຫຼອດການນານ ພິກຂຸທັງຫຼາຍ ອັນໃດນໍ? ບໍ່ແມ່ນຂອງພວກທ່ານ ພິກຂຸທັງຫຼາຍ ຮູບບໍ່ແມ່ນຂອງພວກທ່ານ ທ່ານທັງຫຼາຍຈົ່ງລະຮູບນັ້ນສາເທີ້ນ ຮູບທີ່ພວກທ່ານລະໄດ້ແລ້ວ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ ຕະຫຼອດການນານ ເວທະນາ ຯລຯ ສັນຍາ ຯລຯ ສັງ ຂານ ຯລຯ ວິນຍານ ບໍ່ແມ່ນຂອງພວກທ່ານ ທ່ານທັງຫຼາຍຈົ່ງລະວິນຍານນັ້ນສາເທີ້ນ ວິນຍານທີ່ພວກທ່ານລະໄດ້ແລ້ວຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ ຕະຫຼອດການນານ ລວມຄວາມວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ ແນວນີ້ແດ່ ສົມຈິງດັ່ງພາສິດນີ້ວ່າ

ຄາມະນີ ໄພຍ່ອມບໍ່ມີແກ່ບຸກຄົນຜູ້ແນມເຫັນ
ຄວາມເກີດຂຶ້ນແຫ່ງທຳລ້ອນ ໆ
ແລະຄວາມສືບຕໍ່ແຫ່ງສັງຂານລ້ອນ ໆ ຕາມເປັນຈິງ
ເມື່ອໃດບຸກຄົນແນມເຫັນຂັນທະໂລກ ວ່າ
ສະເໝີດ້ວຍຫຍ້າ ແລະທ່ອນໄມ້ ດ້ວຍປັນຍາ
ເມື່ອນັ້ນ ເຂົາຍ່ອມບໍ່ປາຖະໜາອັນໃດອື່ນ
ນອກຈາກຄວາມບໍ່ປະຕິສົນທິ

ລວມຄວາມວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດແນວນີ້ແດ່

ນາງວະຊິຣາພິກຂຸນີໄດ້ກ່າວຄຳນີ້ກັບມານຜູ້ຊົ່ວຊ້າວ່າ

ມານເອີຍ ທິດຖິຂອງເຈົ້າເຊື່ອໃຜວ່າເປັນສັດ
ຮ່າງກາຍທີ່ເປັນກອງແຫ່ງສັງຂານລ້ວນ ໆ ນີ້ບັນດິດຈະຮຽກວ່າ
ສັດບໍ່ໄດ້ເລີຍ
ເມື່ອຂັນທັງຫຼາຍມີຢູ່ ສົມມຸດວ່າສັດກໍມີໄດ້
ເໝືອນສຽງເວົ້າວ່າລົດຍ່ອມມີໄດ້ ຍ້ອນການຄຸມກັນແຫ່ງສ່ວນປະກອບ
ອັນໜຶ່ງທຸກເທົ່ານັ້ນເກີດຂຶ້ນ ທຸກເທົ່ານັ້ນດຳຣົງຢູ່ແລະ
ເສັ່ນປ່ຽນໄປ ນອກຈາກທຸກບໍ່ມີສິ່ງອື່ນເກີດຂຶ້ນ
ນອກຈາກທຸກບໍ່ມີອັນໃດອື່ນດັບໄປເລີຍ

ລວມຄວາມວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ ແນວນີ້ແດ່

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ) ພິກຂຸທັງຫຼາຍ ແນວນີ້ເອງແລ ພິກຂຸຄົ້ນຫາຮູບຕະຫຼອດຄະຕິແຫ່ງຮູບທີ່ມີຢູ່ ຄົ້ນຫາເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ຄົ້ນຫາວິນຍານ ຕະຫຼອດຄະຕິແຫ່ງວິນຍານທີ່ມີຢູ່ ເມື່ອພິກຂຸນັ້ນຄົ້ນຫາຮູບຕະຫຼອດຄະຕິແຫ່ງຮູບຄົ້ນຫາເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ຄົ້ນຫາວິນຍານຕະຫຼອດຄະຕິແຫ່ງວິນຍານທີ່ມີຢູ່ ຄວາມຖືວ່າ ເຮົາຂອງເຮົາ ຫຼື ມີເຮົາ ຂອງພິກຂຸນັ້ນບໍ່ມີເລີຍ ລວມຄວາມວ່າ ກິເລດເຄື່ອງກັງວົນວ່າ ສິ່ງນີ້ ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ ແນວນີ້ແດ່

## ວ່າດ້ວຍໂລກວ່າງ

ທ່ານພຣະອານົນໄດ້ຂາບທູນຄຳນີ້ກັບພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ພຣະອົງຜູ້ຈະເລີນທີ່ຕັດວ່າໂລກວ່າງ ໂລກວ່າງ ຂ້າແດ່ພຣະອົງຜູ້ຈະເລີນ ດ້ວຍເຫດທໍ່ໃດນໍ ຈຶ່ງຕັດວ່າ ໂລກວ່າງ

ອານົນ ຍ້ອນໂລກວ່າງຈາກຕົນ ຫຼື ຈາກສິ່ງທີ່ເນື່ອງດ້ວຍຕົນ ສະນັ້ນ ເຮົາຈຶ່ງກ່າວວ່າໂລກວ່າງ ອານົນ ອັນໃດນໍ? ທີ່ວ່າງຈາກຕົນ ຫຼື ສິ່ງທີ່ເນື່ອງດ້ວຍຕົນ ອານົນ ຕາວ່າງຈາກຕົນ ຫຼື ສິ່ງທີ່ເນື່ອງດ້ວຍຕົນ ຮູປວ່າງ ໆລໆ ຈັກຂຸວິນຍານວ່າງ ໆລໆ ຈັກຂຸສຳຜັດວ່າງ ຄື ຄວາມສະເຫວີຍອາລົມທີ່ເປັນສຸກ ເປັນທຸກ ຫຼື ເປັນສຸກກໍບໍ່ແມ່ນ ເປັນທຸກກໍບໍ່ແມ່ນ ທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ກໍວ່າງ ໆລໆ ຫູ ໆລໆ ສຽງ ໆລໆ ດັງ ໆລໆ ກິ່ນ ໆລໆ ລີ້ນ ໆລໆ ຣົດ ໆລໆ ກາຍ ໆລໆ ໂຜດຖັບພະ ໆລໆ ໃຈ ໆລໆ ທຳມາຣົມ ໆລໆ ມະໂນວິນຍານ ໆລໆ ມະ

ໂນສຳຜັດ ກໍວ່າງ ຄື ຄວາມສະເຫວີຍອາລົມທີ່ເປັນສຸກ ເປັນທຸກ ຫຼື ເປັນສຸກກໍບໍ່ແມ່ນ ເປັນທຸກກໍບໍ່ແມ່ນ ທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈກໍວ່າງຈາກຕົນ ຫຼື ສິ່ງທີ່ເນື່ອງດ້ວຍຕົນ ອານົນຍ້ອນໂລກວ່າງ ຈາກຕົນ ຫຼື ສິ່ງທີ່ເນື່ອງດ້ວຍຕົນ ສະນັ້ນ ເຮົາຈຶ່ງກ່າວວ່າ ໂລກວ່າງ ລວມຄວາມວ່າ ກິເລດ ເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ ແນວນີ້ແດ່

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໃນຄຳວ່າ ຜູ້ນັ້ນເມື່ອບໍ່ໄດ້ຄວາມຍຶດຖື ວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າ ເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ฯລฯ ນີ້ຊື່ວ່າ ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ฯລฯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ

ຜູ້ນັ້ນລະຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິໄດ້ແລ້ວ ຈຶ່ງບໍ່ພົບ ບໍ່ໄດ້ ຄື ບໍ່ສົມຫວັງ ບໍ່ໄດ້ສະເພາະຄວາມຍຶດຖືວ່າເປັນຂອງເຮົາ ລວມຄວາມວ່າ ຜູ້ນັ້ນເມື່ອບໍ່ໄດ້ຄວາມຍຶດຖືວ່າເປັນຂອງເຮົາ

ຄຳວ່າ ຍ່ອມບໍ່ເສົ້າໂສກວ່າຂອງ ໆ ເຮົາບໍ່ມີ ອະທິບາຍວ່າ ບໍ່ເສົ້າໂສກເຖິງສິ່ງທີ່ຜັນປ່ຽນໄປແລ້ວ ຫຼື ເມື່ອສິ່ງນັ້ນຜັນປ່ຽນໄປແລ້ວຍ່ອມບໍ່ເສົ້າໂສກ ຄື ບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ຕາຂອງເຮົາ ຜັນປ່ຽນໄປ ฯລฯ ຫູຂອງເຮົາ ฯລฯ ບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຮ່ຳໄຮ ບໍ່ຕີເອິກພ່ຳເພີ້ ບໍ່ເຖິງຄວາມຫຼົງໃຫຼວ່າ ฯລฯ ຜູ້ຮ່ວມສາຍໂລຫິດຂອງເຮົາຜັນປ່ຽນໄປ ລວມຄວາມວ່າ ຍ່ອມບໍ່ເສົ້າໂສກວ່າຂອງ ໆ ເຮົາບໍ່ມີ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ກິເລດເຄື່ອງກັງວົນວ່າ ສິ່ງນີ້ຂອງເຮົາ
ຫຼື ສິ່ງນີ້ຂອງຄົນອື່ນ ຍ່ອມບໍ່ມີແກ່ຜູ້ໃດ
ຜູ້ນັ້ນເມື່ອບໍ່ໄດ້ຄວາມຖືວ່າເປັນຂອງເຮົາ
ຍ່ອມບໍ່ເສົ້າໂສກວ່າຂອງ ໆ ເຮົາບໍ່ມີ

[໑໙໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ບຸກຄົນເປັນຜູ້ບໍ່ຣິດສະຫຍາ ບໍ່ຕິດໃຈ
ບໍ່ຫວັ່ນໄຫວ ສະໝ່ຳສະເໝີໃນອາຍະຕະນະທັງປວງ
ເຮົາຖືກຖາມເຖິງບຸກຄົນຜູ້ບໍ່ຫວັ່ນໄຫວ ຈຶ່ງບອກອານິສົງນັ້ນ

## ວ່າດ້ວຍຜູ້ບໍ່ຣິດສະຫຍາ

ຄຳວ່າ ບຸກຄົນເປັນຜູ້ບໍ່ຣິດສະຫຍາ ບໍ່ຕິດໃຈ ອະທິບາຍວ່າ

ຄວາມບໍ່ຣິດສະຫຍາ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ເປັນຜູ້ຣິດສະຫຍາ ຄື ຍ່ອມອິດສາ ຊິງຊັງ ຜູກຣິດສະຫຍາໃນລາບ ສັກກາຣະ ການທຳຄວາມເຄົາຣົບ ການນັບຖື ການຂາບໄຫວ້ ແລະການບູຊາຂອງຜູ້ອື່ນ ຄວາມຣິດສະຫຍາ ການທຳຄວາມຣິດສະຫຍາ ຄວາມອິດສາ ກິຣິຍາທີ່ອິດສາ ພາວະທີ່ອິດສາ ຄວາມກຽດຊັງ ກິຣິຍາທີ່ກຽດຊັງ ພາວະທີ່ກຽດຊັງ ເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຣິດສະຫຍາ ຄວາມຣິດສະຫຍານີ້ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ບໍ່ຣິດສະຫຍາ

ຄຳວ່າ ບໍ່ຕິດໃຈ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຕິດໃຈ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ ຄວາມຕິດໃຈນີ້ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄື ຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ບໍ່ຕິດໃຈ

ເຂົາບໍ່ຕິດໃນຣູບ ฯລฯ ບໍ່ຕິດໃຈ ຄື ບໍ່ກຳໜັດ ບໍ່ສະຍົບ ບໍ່ມົກມຸ້ນໃນຣູບທີ່ເຫັນ ສຽງ ທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ໄດ້ແກ່ ເປັນຜູ້ຄາຍຄວາມຕິດໃຈແລ້ວ ປາສະຈາກຄວາມຕິດໃຈແລ້ວ ສະລະຄວາມຕິດໃຈແລ້ວ ຄາຍຄວາມຕິດໃຈແລ້ວ ປ່ອຍວາງຄວາມຕິດໃຈແລ້ວ ລະຄວາມຕິດໃຈແລ້ວ ສະລັດຖິ້ມຄວາມຕິດໃຈແລ້ວ ເປັນຜູ້ຄາຍຄວາມກຳໜັດແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍວາງຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະໄດ້ແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ບຸກຄົນເປັນຜູ້ບໍ່ຣິດສະຫຍາ ບໍ່ຕິດໃຈ

## ວ່າດ້ວຍຜູ້ບໍ່ຫວັ່ນໄຫວ

ຄຳວ່າ ບໍ່ຫວັ່ນໄຫວ ສະໝ່ຳສະເໝີໃນອາຍະຕະນະທັງປວງ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຫວັ່ນໄຫວ ຄື ຄວາມກຳໜັດ ຄວາມກຳໜັດແຮງ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ ຕັນຫາທີ່ຕັດຮຽກວ່າຄວາມຫວັ່ນໄຫວນີ້ ບຸກຄົນໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ບຸກຄົນນັ້ນຕັດຮຽກວ່າ ບໍ່ຫວັ່ນໄຫວ ຍ້ອນເປັນຜູ້ລະຄວາມຫວັ່ນໄຫວໄດ້ແລ້ວ ຈຶ່ງຊື່ວ່າບໍ່ຫວັ່ນໄຫວ ບຸກຄົນນັ້ນຍ່ອມບໍ່ຫວັ່ນໄຫວ ບໍ່ສະເທືອນ ບໍ່ເຄື່ອນໄຫວ ບໍ່ສະທ້ານ ບໍ່ສັ່ນສະທ້ານ ຍ້ອນໄດ້ລາບ

ຍ້ອນເສື່ອມລາບແດ່ ຍ້ອນໄດ້ຍົດ ຍ້ອນເສື່ອມຍົດແດ່ ຍ້ອນສັນເສີນ ຍ້ອນນິນທາແດ່ ຍ້ອນສຸກ ຍ້ອນທຸກແດ່ ຈຶ່ງຊື່ວ່າບໍ່ຫວັ່ນໄຫວ

ຄຳວ່າ ສະໝ່ຳສະເໝີໃນອາຍະຕະນະທັງປວງ ອະທິບາຍວ່າ ອາຍະຕະນະ ໑໒ ຕັດຮຽກວ່າ ສິ່ງທັງປວງ ຄື ຕາ ແລະ ຮູບ ຯລຯ ໃຈ ແລະ ທຳມາຣົມ

ເມື່ອໃດ ຄວາມກຳໜັດດ້ວຍຄວາມພໍໃຈໃນອາຍະຕະນະທັງພາຍໃນ ແລະພາຍນອກ ບຸກຄົນໃດ ລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ບຸກຄົນນັ້ນຕັດຮຽກວ່າ ສະໝ່ຳສະເໝີໃນອາຍະຕະນະທັງປວງ ເຂົາເປັນຜູ້ໝັ້ນຄົງໃນອາຍະຕະນະທັງປວງ ມີຕົນເປັນກາງໃນອາຍະຕະນະທັງປວງ ວາງເສີຍໃນອາຍະຕະນະທັງປວງ ລວມຄວາມວ່າ ບໍ່ຫວັ່ນໄຫວ ສະໝ່ຳສະເໝີໃນອາຍະຕະນະທັງປວງ

ຄຳວ່າ ເຮົາຖືກຖາມເຖິງບຸກຄົນຜູ້ບໍ່ຫວັ່ນໄຫວ ຈຶ່ງບອກອານິສົງນັ້ນ ອະທິບາຍວ່າ ເຮົາຖືກຖາມເຖິງ ຄື ຖືກຂໍ ຖືກເຊື້ອເຊີນ ຖືກຂໍໃຫ້ສະແດງບຸກຄົນຜູ້ບໍ່ຫວັ່ນໄຫວ ຈຶ່ງບອກ ອານິສົງ ໔ ເຫຼົ່ານີ້ ຄື ກ່າວ ບອກ ຯລຯ ປະກາດວ່າ ບຸກຄົນຜູ້ບໍ່ຣິດສະຫຍາ ບໍ່ຕິດໃຈ ບໍ່ຫວັ່ນໄຫວ ສະໝ່ຳສະເໝີໃນອາຍະຕະນະທັງປວງ ລວມຄວາມວ່າ ເຮົາຖືກຖາມເຖິງບຸກຄົນຜູ້ບໍ່ຫວັ່ນໄຫວ ຈຶ່ງບອກອານິສົງນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ບຸກຄົນເປັນຜູ້ບໍ່ຣິດສະຫຍາ ບໍ່ຕິດໃຈ
ບໍ່ຫວັ່ນໄຫວ ສະໝ່ຳສະເໝີໃນອາຍະຕະນະທັງປວງ
ເຮົາຖືກຖາມເຖິງບຸກຄົນຜູ້ບໍ່ຫວັ່ນໄຫວ ຈຶ່ງບອກອານິສົງນັ້ນ

[໑໗໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ອະພິສັງຂານໃດ ໆ ຍ່ອມບໍ່ມີແກ່ຜູ້ບໍ່ຫວັ່ນໄຫວ ຮູ້ແຈ່ມແຈ້ງ
ເຂົາງົດເວັ້ນແລ້ວຈາກການຜາຣົບອະພິສັງຂານ
ຍ່ອມແນມເຫັນຄວາມປອດໂປ່ງໃນທີ່ທັງປວງ

ຄຳວ່າ ຜູ້ບໍ່ຫວັ່ນໄຫວ ຮູ້ແຈ່ມແຈ້ງ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຫວັ່ນໄຫວ ຄື ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ ຕັນຫາທີ່ຕັດຮຽກວ່າ ຄວາມຫວັ່ນໄຫວ ນີ້ ບຸກຄົນໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟ ຄື ຍານແລ້ວ ບຸກຄົນນັ້ນຕັດຮຽກວ່າ ຜູ້ບໍ່ຫວັ່ນໄຫວ ຍ້ອນເປັນຜູ້ລະຄວາມຫວັ່ນໄຫວໄດ້ແລ້ວ ຈຶ່ງຊື່ວ່າຜູ້ບໍ່ຫວັ່ນໄຫວ ບຸກຄົນຍ່ອມບໍ່ຫວັ່ນໄຫວ ຄື ບໍ່ສະເທືອນ ບໍ່ເຄື່ອນໄຫວ ບໍ່ສະທ້ານ ບໍ່ສັ່ນສະທ້ານ ຍ້ອນໄດ້ລາບ ຍ້ອນເສື່ອມລາບ

ແດ່ ຍ້ອນໄດ້ຍົດ ຍ້ອນເສື່ອມຍົດແດ່ ຍ້ອນສັນເສີນ ຍ້ອນນິນທາແດ່ ຍ້ອນສຸກ ຍ້ອນທຸກແດ່ ລວມຄວາມວ່າ ຜູ້ບໍ່ຫວັ່ນໄຫວ

ຄຳວ່າ ຮູ້ແຈ່ມແຈ້ງ ໄດ້ແກ່ ຮູ້ ຮູ້ທົ່ວ ຮູ້ແຈ່ມແຈ້ງ ຄື ຮູ້ສະເພາະ ແທງຕະຫຼອດວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ຮູ້ ຮູ້ທົ່ວ ຮູ້ແຈ່ມແຈ້ງ ຄື ຮູ້ສະເພາະ ແທງຕະຫຼອດວ່າ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ຜູ້ບໍ່ຫວັ່ນໄຫວ ຮູ້ແຈ່ມແຈ້ງ

ຄຳວ່າ ອະພິສັງຂານໃດ ໆ ຍ່ອມບໍ່ມີ ອະທິບາຍວ່າ ປຸນຍາພິສັງຂານ ອະປຸນຍາພິສັງຂານ ອາເນນຊາພິສັງຂານ ຕັດຮຽກວ່າ ອະພິສັງຂານ ປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະອາເນນຊາພິສັງຂານ ເຂົາລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດ້ວຍເຫດໃດ ດ້ວຍເຫດພຽງເທົ່ານີ້ ອະພິສັງຂານທັງຫຼາຍ ຍ່ອມບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ຄື ອະພິສັງຂານເຂົາລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟ ຄື ຍານແລ້ວ ລວມຄວາມວ່າ ອະພິສັງຂານໃດ ໆ ຍ່ອມບໍ່ມີ

ຄຳວ່າ ເຂົາງົດເວັ້ນແລ້ວຈາກການຜາຣົບອະພິສັງຂານ ອະທິບາຍວ່າ ປຸນຍາພິສັງ ຂານ ອະປຸນຍາພິສັງຂານ ອາເນນຊາພິສັງຂານ ຕັດຮຽກວ່າ ອະພິສັງຂານ ປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະ ອາເນນຊາພິສັງຂານ ເຂົາລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປ ບໍ່ໄດ້ດ້ວຍເຫດໃດ ດ້ວຍເຫດພຽງເທົ່ານີ້ ເຂົາເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບການຜາຣົບອະພິສັງຂານ ມີໃຈເປັນອິດສະຫຼະ (ຈາກອະພິສັງຂານ) ຢູ່ ລວມຄວາມວ່າ ເຂົາງົດເວັ້ນແລ້ວຈາກການຜາຣົບອະພິສັງຂານ

ຄຳວ່າ ຍ່ອມແນມເຫັນຄວາມປອດໂປ່ງໃນທີ່ທັງປວງ ອະທິບາຍວ່າ ຣາຄະ ໂທສະ ໂມຫະ ຯລຯ ກິເລດທັງຫຼາຍ ເປັນເຫດກໍ່ໄພ ຍ້ອນເປັນຜູ້ລະຣາຄະເຊິ່ງເປັນເຫດກໍ່ໄພສາໄດ້ ຯລຯ ຍ້ອນເປັນຜູ້ລະກິເລດທັງຫຼາຍ ເຊິ່ງເປັນເຫດກໍ່ໄພ ເຂົາຈຶ່ງແນມເຫັນຄວາມປອດໂປ່ງໃນທີ່ ທັງປວງ ຄື ເບິ່ງເຫັນຄວາມປອດໄພໃນທີ່ທັງປວງ ເບິ່ງເຫັນຄວາມບໍ່ມີສະຫນຽດຈັງໄຮໃນທີ່ທັງປວງ ເບິ່ງເຫັນຄວາມບໍ່ມີອຸປັດວະໃນທີ່ທັງປວງ ເບິ່ງເຫັນຄວາມບໍ່ມີອຸປະສັກໃນທີ່ທັງປວງ ເບິ່ງເຫັນຄວາມບໍ່ຕິດຂັດໃນທີ່ທັງປວງ ລວມຄວາມວ່າ ຍ່ອມແນມເຫັນຄວາມປອດໂປ່ງໃນທີ່ ທັງປວງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ອະພິສັງຂານໃດ ໆ ຍ່ອມບໍ່ມີແກ່ຜູ້ບໍ່ຫວັ່ນໄຫວ ຮູ້ແຈ່ມແຈ້ງ
ເຂົາງົດເວັ້ນແລ້ວຈາກການຜາຣົບອະພິສັງຂານ
ຍ່ອມແນມເຫັນຄວາມປອດໂປ່ງໃນທີ່ທັງປວງ

[໑໗໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ມຸນີຍ່ອມບໍ່ກ່າວເຖິງຕົນໃນໝູ່ຄົນທີ່ສະເໝີກັນ
ດ້ອຍກວ່າ (ຫຼື) ເລີດກວ່າເລີຍ
ມຸນີນັ້ນ ເປັນຜູ້ສະງົບ ຄາຍຄວາມຂີ້ຖີ່ ບໍ່ຍຶດຖື ບໍ່ສະລັດຖິ້ມ

## ວ່າດ້ວຍຄຸນສົມບັດຂອງມຸນີ

ຄຳວ່າ ມຸນີຍ່ອມບໍ່ກ່າວເຖິງຕົນໃນໝູ່ຄົນທີ່ສະເໝີກັນ ດ້ອຍກວ່າ (ຫຼື) ເລີດກວ່າ ເລີຍ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຄື ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຜູ້ກ້າວລ່ວງ ກິເລດເຄື່ອງຂ້ອງແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ມຸນີຍ່ອມບໍ່ກ່າວເຖິງ ຄື ບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງວ່າ ເຮົາເລີດກວ່າເຂົາ ເຮົາສະເໝີເຂົາ ຫຼືເຮົາດ້ອຍກວ່າເຂົາ ລວມຄວາມວ່າ ມຸນີຍ່ອມບໍ່ກ່າວເຖິງຕົນໃນໝູ່ຄົນທີ່ ສະເໝີກັນ ດ້ອຍກວ່າ (ຫຼື) ເລີດກວ່າເລີຍ

ຄຳວ່າ ເປັນຜູ້ສະງົບ ໃນຄຳວ່າ ມຸນີນັ້ນ ເປັນຜູ້ສະງົບ ຄາຍຄວາມຂີ້ຖີ່ ອະທິບາຍວ່າ

ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບຣາຄະ

ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບໂທສະ

ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບໂມຫະ ຯລຯ

ຊື່ວ່າເປັນຜູ້ສະງົບ ຄື ເຂົ້າໄປສະງົບ ສະງົບເຢັນ ດັບ ຣະງັບໄດ້ແລ້ວ ຍ້ອນສະງົບ ຣະງັບ ສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບຣະງັບ ອະກຸສະລາພິສັງຂານທຸກປະເພດ ລວມຄວາມວ່າ ມຸນີນັ້ນ ເປັນຜູ້ສະງົບ

ຄຳວ່າ ຄາຍຄວາມຂີ້ຖີ່ ອະທິບາຍວ່າ ມັດສະຣິຍະ ໕ ຢ່າງ ຄື (໑) ອາວາດມັດສະ ຣິຍະ ຯລຯ ຄວາມມຸ້ງແຕ່ຈະໄດ້ ຕັດຮຽກວ່າ ຄວາມຂີ້ຖີ່

ຄວາມຂີ້ຖີ່ນີ້ ມຸນີໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟ ຄື ຍານແລ້ວ ມຸນີນັ້ນ ຕັດຮຽກວ່າ ຄາຍຄວາມຂີ້ຖີ່ ຄື ປາສະຈາກຄວາມຂີ້ຖີ່ ສະລະຄວາມຂີ້ຖີ່ ຄາຍຄວາມຂີ້ຖີ່ ປ່ອຍຄວາມຂີ້ຖີ່ ລະຄວາມຂີ້ຖີ່ ສະລັດຖິ້ມຄວາມຂີ້ຖີ່ ລວມຄວາມວ່າ ມຸນີນັ້ນ ເປັນຜູ້ສະງົບ ຄາຍຄວາມຂີ້ຖີ່

ຄຳວ່າ ບໍ່ຍຶດຖື ໃນຄຳວ່າ ບໍ່ຍຶດຖື ບໍ່ສະລັດຖິ້ມ ອະທິບາຍວ່າ ບໍ່ຍຶດຖື ຄື ບໍ່ຖືເອົາ ບໍ່ເຂົ້າໄປຍຶດຖື ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຄະຕິ ຯລຯ ການຖືກຳເນີດ ຯລຯ ປະຕິສົນທິ ຯລຯ ພົບ ຯລຯ ສົງສານ ບໍ່ຍຶດຖື ຄື ບໍ່ຖືເອົາ ບໍ່ເຂົ້າໄປຍຶດຖື ບໍ່ຖື ບໍ່ຍຶດໝັ້ນ ບໍ່ຖືໝັ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ເຮັດໃຫ້ເຖິງຄວາມບໍ່ມີອີກເຊິ່ງວັດຕະ ລວມຄວາມວ່າ ບໍ່ຍຶດຖື

ຄຳວ່າ ບໍ່ສະລັດຖິ້ມ ອະທິບາຍວ່າ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ເຮັດໃຫ້ເຖິງຄວາມບໍ່ມີອີກເຊິ່ງຮູບ ຄື ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ເຮັດໃຫ້ເຖິງຄວາມບໍ່ມີອີກເຊິ່ງເວທະນາ ຯລຯ ສັນຍາ ຯລຯສັງຂານ ຯລຯ ວິນຍານ ຯລຯ ຄະຕິ ຯລຯ ການຖືກຳເນີດ ຯລຯ ປະຕິສົນທິ ຯລຯ ພົບ ຯລຯ ສົງສານ ຯລຯ ວັດຕະ ລວມຄວາມວ່າ ບໍ່ສະລັດຖິ້ມ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ

ມຸນີຍ່ອມບໍ່ກ່າວເຖິງຕົນໃນໝູ່ຄົນທີ່ສະເໝີກັນ
ດ້ອຍກວ່າ (ຫຼື) ເລີດກວ່າເລີຍ
ມຸນີນັ້ນ ເປັນຜູ້ສະງົບ ຄາຍຄວາມຂີ້ຖີ່ ບໍ່ຍຶດຖື ບໍ່ສະລັດຖິ້ມ

**ອັດຕະທັນດະສຸດຕະນິດເທດທີ ໑໕ ຈົບ**

# ໑໖. ສາຣີປຸດຕະສຸດຕະນິດເທດ

## ອະທິບາຍສາຣີປຸດຕະສູດ

### ວ່າດ້ວຍພຣະສາຣີບຸດກ່າວສັນເສີນພຣະພຸດທະຄຸນ

ພຣະສາຣີບຸດເຖຣະຈະກ່າວອະທິບາຍສາຣີປຸດຕະສູດ ດັ່ງຕໍ່ໄປນີ້

[໑໙໐] (ທ່ານພຣະສາຣີບຸດກ່າວດັ່ງນີ້)

ພຣະສາດສະດາ ຜູ້ມີພຣະສຸຣະສຽງມ່ວນແນວນີ້
ໄດ້ສະເດັດຈາກພົບດຸສິດມາເປັນພຣະຄະນາຈານ
ກ່ອນໜ້ານີ້ ຂ້າພະເຈົ້າບໍ່ເຄີຍເຫັນ
ທັງບໍ່ເຄີຍໄດ້ຍິນຈາກໃຜ ໆ ມາເລີຍ

ຄຳວ່າ ກ່ອນໜ້ານີ້ ຂ້າພະເຈົ້າບໍ່ເຄີຍເຫັນ ອະທິບາຍວ່າ ກ່ອນໜ້ານີ້ ຂ້າພະເຈົ້າ ບໍ່ເຄີຍເຫັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນດ້ວຍຕານີ້ ດ້ວຍອັດຕະພາບນີ້ເລີຍ ຄື ໃນການໃດ ພຣະຜູ້ມີພຣະພາກເຈົ້າສະເດັດອອກພັນສາທີ່ບັນດຸກຳພົນສິລາອາດ ຢູ່ເຫງົ້າໄມ້ປາຣິສັດຕະກະ ໃນພົບຕາວະຕິງສາ ອັນໝູ່ເທວະດາແວດລ້ອມສະເດັດລົງສູ່ສັງກັດສະນະຄອນທາງບັນໄດແກ້ວມະນີ ສູນ

ກາງໃນການນັ້ນ ເວັ້ນການເຫັນຄັ້ງນີ້ ຂ້າພະເຈົ້າບໍ່ເຄີຍເຫັນໃນການກ່ອນເລີຍ ລວມຄວາມວ່າ ກ່ອນໜ້ານີ້ ຂ້າພະເຈົ້າບໍ່ເຄີຍເຫັນ

ຄໍາວ່າ ດັ່ງນີ້ ໃນຄໍາວ່າ ທ່ານພຣະສາຣີບຸດກ່າວ ດັ່ງນີ້ ເປັນບົດສົນທິ ເປັນຄໍາເຊື່ອມບົດ ເປັນຄໍາທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສໍາພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງ ພະຍັນຊະນະ ຄໍາວ່າ ດັ່ງນີ້ ນີ້ເປັນຄໍາເຊື່ອມບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄໍາວ່າ ທ່ານ ເປັນຄໍາກ່າວດ້ວຍຄວາມຮັກ ເປັນຄໍາກ່າວໂດຍຄວາມເຄົາຣົບ ຄໍາວ່າ ທ່ານ ນີ້ ເປັນຄໍາກ່າວທີ່ມີຄວາມເຄົາຣົບ ແລະ ຢໍາເກງ

ຄໍາວ່າ ພຣະສາຣີບຸດ ເປັນຊື່ຂອງພຣະເຖຣະນັ້ນ ຄື ເປັນການກ່າວເຖິງ ການຂະໜານ ນາມ ການບັນຍັດ ຊື່ທີ່ຮຽກກັນ ຊື່ ການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານພຣະສາຣີບຸດກ່າວດັ່ງນີ້

ຄໍາວ່າ ບໍ່ ໃນຄໍາວ່າ ທັງບໍ່ເຄີຍໄດ້ຍິນຈາກໃຜ ໆ ມາເລີຍ ເປັນຄໍາປະຕິເສດ

ຄໍາວ່າ ທັງ ເປັນບົດສົນທິ ເປັນຄໍາເຊື່ອມບົດ ເປັນຄໍາທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມ ສໍາພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄໍາວ່າ ທັງນີ້ ເປັນຄໍາເຊື່ອມ ບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄໍາວ່າ ໃຜ ໆ ໄດ້ແກ່ ໃຜ ໆ ຄື ຜູ້ເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດ ລວມຄວາມວ່າ ທັງບໍ່ເຄີຍໄດ້ຍິນຈາກໃຜ ໆ ມາເລີຍ

## ວ່າດ້ວຍພຣະສຸຣະສຽງຂອງພຣະພຸດທະເຈົ້າປະກອບດ້ວຍອົງ ໘

ຄໍາວ່າ ພຣະສາດສະດາຜູ້ມີພຣະສຸຣະສຽງມ່ວນແນວນີ້ ອະທິບາຍວ່າ ພຣະສາດສະດາ ຜູ້ມີພຣະສຸຣະສຽງມ່ວນ ຄື ເປັນຜູ້ມີພຣະສຸຣະສຽງອ່ອນຫວານ ມີພຣະສຸຣະສຽງເປັນບ່ອນຕັ້ງ ແຫ່ງຄວາມຮັກ ມີພຣະສຸຣະສຽງດູດດື່ມຫົວໃຈ ມີພຣະສຸຣະສຽງມ່ວນເໝືອນສຽງນົກກາຣະເວກ ກໍພຣະສຸຣະສຽງທີ່ປະກອບດ້ວຍອົງ ໘ ເປ່ງອອກຈາກພຣະໂອດຂອງພຣະຜູ້ມີພຣະພາກເຈົ້າພຣະ ອົງນັ້ນ ຄື

| | |
|---|---|
| ໑. ສະຫຼະສະຫຼວຍ | ໔. ເຂົ້າໃຈງ່າຍ |
| ໒. ມ່ວນ | ໔. ໜ້າຟັງ |
| ໕. ມ່ວນຫູ | ໖. ບໍ່ພຽນ |
| ໗. ເລີກລ້ຳ | ໘. ກ້ອງກັງວານ |

ເມື່ອໃດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງປະກາດໃຫ້ບໍລິສັດຮູ້ດ້ວຍພຣະສຸຣະສຽງ ເມື່ອນັ້ນ ພຣະສຸຣະສຽງຂອງພຣະອົງບໍ່ອອກໄປນອກບໍລິສັດ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ມີພຣະສຸຣະສຽງເໝືອນສຽງພົມ ມີປົກກະຕິຕັດມ່ວນເໝືອນສຽງນົກກາຣະເວກ ລວມຄວາມວ່າ ພຣະສາດສະດາຜູ້ມີພຣະສຸຣະສຽງມ່ວນແນວນີ້

ຄຳວ່າ ພຣະສາດສະດາ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງນຳໝູ່ ຊື່ວ່າພຣະສາດສະດາ ເໝືອນບຸກຄົນຜູ້ນຳໝູ່ກວຽນ ຍ່ອມນຳໝູ່ກວຽນຂ້າມບ່ອນກັນດານ ຂ້າມ ຄື ຂ້າມຂຶ້ນ ຂ້າມອອກ ຂ້າມພົ້ນບ່ອນກັນດານຍ້ອນໂຈນ ບ່ອນກັນດານຍ້ອນສັດຮ້າຍ ບ່ອນກັນດານຍ້ອນອຶດຢາກ ບ່ອນກັນດານຍ້ອນຂາດນ້ຳ ໄດ້ແກ່ ໃຫ້ເຖິງຖິ່ນທີ່ປອດໄພ ສັນໃດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງນຳໝູ່ ຍ່ອມຊົງນຳໝູ່ຂ້າມບ່ອນກັນດານ ຂ້າມ ຄື ຂ້າມຂຶ້ນ ຂ້າມອອກ ຂ້າມພົ້ນບ່ອນກັນດານຍ້ອນຄວາມເກີດ ບ່ອນກັນດານຍ້ອນຄວາມແກ່ ບ່ອນກັນດານຍ້ອນຄວາມເຈັບປ່ວຍ ບ່ອນກັນດານຍ້ອນຄວາມຕາຍ ບ່ອນກັນດານຍ້ອນຄວາມເສົ້າໂສກ ຄວາມຮ່ຳໄຮ ຄວາມທຸກກາຍ ຄວາມທຸກໃຈ ຄວາມຄັບແຄ້ນໃຈ ບ່ອນກັນດານຍ້ອນຄວາມກຳໜັດ ບ່ອນກັນດານຍ້ອນຄວາມຂັດເຄືອງ ບ່ອນກັນດານຍ້ອນຄວາມລຸ້ມຫຼົງ ບ່ອນກັນດານຍ້ອນຄວາມຖືຕົວ ບ່ອນກັນດານຍ້ອນທິດຖິ ບ່ອນກັນດານຍ້ອນກິເລດ ບ່ອນກັນດານຍ້ອນທຸດຈະຣິດ ຄື ຄວາມຮົກທຶບຍ້ອນຄວາມກຳໜັດ ຄວາມຮົກທຶບຍ້ອນຄວາມຂັດເຄືອງ ຄວາມຮົກທຶບຍ້ອນຄວາມລຸ້ມຫຼົງ ຄວາມຮົກທຶບຍ້ອນຄວາມຖືຕົວ ຄວາມຮົກທຶບຍ້ອນທິດຖິ ຄວາມຮົກທຶບຍ້ອນກິເລດ ຄວາມຮົກທຶບຍ້ອນທຸດຈະຣິດ ໄດ້ແກ່ ໃຫ້ເຖິງອະມະຕະນິບພານອັນເປັນແດນກະເສມ ສັນນັ້ນຄືກັນ ຍ້ອນເຫດນັ້ນ ພຣະສາດສະດາຈຶ່ງຊື່ວ່າຜູ້ຊົງນຳໝູ່ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ຊົງເປັນຜູ້ນຳ ເປັນຜູ້ນຳໄປໂດຍວິເສດ ເປັນຜູ້ຕາມແນະນຳ ຊົງໃຫ້ຮູ້ຈັກປະໂຫຍດ ໃຫ້ພິນິດພິຈາລະນາ ໃຫ້ເພ່ງປະໂຫຍດ ຊົງເຮັດໃຫ້ເຫຼື້ອມໃສໄດ້ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊື່ວ່າຜູ້ຊົງນຳໝູ່ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເຮັດມັກ ທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊົງເຮັດມັກ ທີ່ຍັງບໍ່ເກີດໃຫ້ເກີດພ້ອມ ຕັດບອກມັກທີ່ຍັງບໍ່ໄດ້ຕັດບອກ ຊົງຮູ້ຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ແລະສາວົກຂອງພຣະອົງຜູ້ດຳເນີນໄປຕາມມັກຢູ່ໃນບັດນີ້ ຈະພຽບພ້ອມດ້ວຍສີລາທິຄຸນໃນພາຍຫຼັງ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊື່ວ່າຜູ້ຊົງນຳໝູ່ ແນວນີ້ແດ່ ລວມຄວາມວ່າ ພຣະສາດສະດາຜູ້ມີພຣະສຸຣະສຽງມ່ວນແນວນີ້

## ວ່າດ້ວຍພຣະພຸດທະເຈົ້າຊົງເປັນພຣະຄະນາຈານ

ຄຳວ່າ ໄດ້ສະເດັດຈາກພົບດຸສິດມາເປັນພຣະຄະນາຈານ ອະທິບາຍວ່າ ພຣະຜູ້ມີ ພຣະພາກເຈົ້າຊົງຈຸຕິຈາກໝູ່ເທບຊັ້ນດຸສິດ ຊົງມີສະຕິສຳປະຊັນຍະ ສະເດັດລົງສູ່ອຸທອນພຣະ ມານດາ ລວມຄວາມວ່າ ໄດ້ສະເດັດຈາກພົບດຸສິດມາເປັນພຣະຄະນາຈານ ແນວນີ້ແດ່

ອີກໄນໜຶ່ງ ເຫຼົ່າເທບຕັດຮຽກວ່າ ຊາວດຸສິດ ເທບເຫຼົ່ານັ້ນ ຍິນດີ ພໍໃຈ ເບີກບານໃຈ ເກີດປີຕິໂສມະນັດວ່າ ພຣະສາດສະດາສະເດັດຈາກເທວະໂລກຊັ້ນດຸສິດມາເປັນພຣະຄະນາຈານ ລວມຄວາມວ່າ ໄດ້ສະເດັດຈາກພົບດຸສິດມາເປັນພຣະຄະນາຈານ ແນວນີ້ແດ່

ອີກໄນໜຶ່ງ ພຣະອະຣະຫັນຕັດຮຽກວ່າ ຊາວດຸສິດ ພຣະອະຣະຫັນເຫຼົ່ານັ້ນ ຍິນດີ ພໍໃຈ ມີຄວາມດໍາຣິບໍລິບູນວ່າ ພຣະສາດສະດາສະເດັດມາສູ່ຄວາມເປັນພຣະຄະນາຈານຂອງ ພຣະອະຣະຫັນທັງຫຼາຍ ລວມຄວາມວ່າ ໄດ້ສະເດັດຈາກພິບດຸສິດມາເປັນພຣະຄະນາຈານ ແນວນີ້ແດ່

ຄໍາວ່າ ພຣະຄະນາຈານ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງເປັນພຣະຄະນາຈານ

ຊົງເປັນອາຈານແຫ່ງໝູ່ຄະນະ ຈຶ່ງຊື່ວ່າ ພຣະຄະນາຈານ
ຊົງເປັນສາດສະດາແຫ່ງໝູ່ຄະນະ ຈຶ່ງຊື່ວ່າ ພຣະຄະນາຈານ
ຊົງບໍລິຫານໝູ່ຄະນະ ຈຶ່ງຊື່ວ່າ ພຣະຄະນາຈານ
ຊົງສັ່ງສອນໝູ່ຄະນະ ຈຶ່ງຊື່ວ່າ ພຣະຄະນາຈານ
ຊົງຕາມສອນໝູ່ຄະນະ ຈຶ່ງຊື່ວ່າ ພຣະຄະນາຈານ
ຊົງແກ່ກ້າສະເດັດເຂົ້າສູ່ໝູ່ຄະນະ ຈຶ່ງຊື່ວ່າພຣະຄະນາຈານ

ໝູ່ຄະນະຍ່ອມຕັ້ງໃຈຟັງ ເງ່ຍໂສຕະລົງຟັງພຣະອົງ ຕັ້ງຈິດເພື່ອຄວາມຮູ້ ຈຶ່ງຊື່ວ່າ ພຣະຄະນາຈານ ພຣະສາດສະດາຊົງເຮັດໝູ່ຄະນະໃຫ້ອອກຈາກອະກຸສົນແລ້ວໃຫ້ດໍາຣົງຢູ່ໃນກຸສົນ ຈຶ່ງຊື່ວ່າ ພຣະຄະນາຈານ ຊົງເປັນພຣະຄະນາຈານຂອງໝູ່ພິກຂຸ ຯລຯ ໝູ່ພິກຂຸນີ ຯລຯ ໝູ່ອຸປາສົກ ຯລຯ ໝູ່ອຸປາສິກາ ຯລຯ ໝູ່ພຣະຣາຊາ ຯລຯ ໝູ່ກະສັດ ຯລຯ ໝູ່ພາມ ຯລຯ ໝູ່ແພດ ຯລຯ ໝູ່ສູດ ຯລຯ ໝູ່ເທບ ຯລຯ ໝູ່ພົມ ຈຶ່ງຊື່ວ່າພຣະຄະນາຈານ ພຣະສາດສະດາຊົງເປັນຜູ້ນໍາໝູ່ ເປັນພຣະຄະນາຈານ ເປັນອາຈານແຫ່ງໝູ່ຄະນະ

ຄໍາວ່າ ສະເດັດມາແລ້ວ ໄດ້ແກ່ ຊົງເຂົ້າໄປ ຊົງເຂົ້າໄປເຖິງ ຊົງເຖິງພ້ອມ ເຊິ່ງສັງກັດສະນະຄອນແລ້ວ ລວມຄວາມວ່າ ສະເດັດຈາກພິບດຸສິດມາເປັນພຣະຄະນາຈານ ດ້ວຍເຫດນັ້ນ ພຣະສາຣີບຸດເຖຣະຈຶ່ງກ່າວວ່າ

ພຣະສາດສະດາ ຜູ້ມີພຣະສຸຣະສຽງມ່ວນແນວນີ້
ໄດ້ສະເດັດຈາກພິບດຸສິດມາເປັນພຣະຄະນາຈານ
ກ່ອນໜ້ານີ້ ຂ້າພະເຈົ້າບໍ່ເຄີຍເຫັນ
ທັງບໍ່ເຄີຍໄດ້ຍິນຈາກໃຜ ໆ ມາເລີຍ

[໑໗໑] (ພຣະສາຣີບຸດກ່າວວ່າ)

ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ
ຍ່ອມຜາກົດແກ່ຊາວໂລກ ພ້ອມທັງເທວະໂລກ
ຊົງກໍາຈັດຄວາມມືດທັງປວງ
ຊົງເປັນເອກບຸຣຸດ ບັນລຸຄວາມຍິນດີແລ້ວ

ຄຳວ່າ ແກ່ຊາວໂລກພ້ອມທັງເທວະໂລກ ອະທິບາຍວ່າ ແກ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແກ່ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ລວມຄວາມວ່າ ແກ່ຊາວໂລກພ້ອມທັງເທວະໂລກ

## ວ່າດ້ວຍພຣະພຸດທະເຈົ້າຜາກົດແກ່ເທວະດາແລະມະນຸດ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ ຍ່ອມຜາກົດ ອະທິບາຍວ່າ ພວກເທວະດາແນມເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ປະທັບນັ່ງເໜືອພຣະແທ່ນບັນດຸກຳພົນສີລາອາດ ຢູ່ເຫງົ້າຕົ້ນປາຣີສັດຕະກະ (ຕົ້ນທອງຫຼາງ) ໃນພົບຕາວະຕິງສາ ຊົງສະແດງທຳຢູ່ແນວໃດ ພວກມະນຸດກໍເຫັນແນວນັ້ນ ພວກມະນຸດເຫັນແນວໃດ ພວກເທວະດາກໍເຫັນແນວນັ້ນ ຊົງຜາກົດແກ່ພວກເທບແນວໃດ ກໍຊົງຜາກົດແກ່ພວກມະນຸດແນວນັ້ນ ຊົງຜາກົດແກ່ພວກມະນຸດແນວໃດ ກໍຊົງຜາກົດແກ່ພວກເທບແນວນັ້ນ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ ຍ່ອມຜາກົດ ແນວນີ້ແດ່

ອີກໄນໜຶ່ງ ສະມະນະພາມ ຜູ້ຈະເລີນເຫຼົ່ານີ້ ຍັງບໍ່ໄດ້ເຝິກຕົນ ກໍຜາກົດໂດຍເພດແຫ່ງບຸກຄົນຜູ້ເຝິກແລ້ວ ຍັງບໍ່ໄດ້ສະງົບ ກໍຜາກົດໂດຍເພດແຫ່ງບຸກຄົນຜູ້ສະງົບແລ້ວ ຍັງບໍ່ໄດ້ເຂົ້າໄປສະງົບກໍຜາກົດໂດຍເພດແຫ່ງບຸກຄົນຜູ້ເຂົ້າໄປສະງົບແລ້ວ ຍັງບໍ່ໄດ້ດັບ ກໍຜາກົດໂດຍເພດແຫ່ງບຸກຄົນຜູ້ດັບແລ້ວ (ສົມຈິງດັ່ງພາສິດວ່າ)

ສະມະນະພາມທັງຫຼາຍ ຜູ້ບໍ່ບໍລິສຸດພາຍໃນ
ງາມແຕ່ພາຍນອກ ມີບໍລິວານຫ້ອມລ້ອມ ທ່ຽວໄປໃນໂລກ
ເໝືອນຄັນໂທດິນຫຸ້ມຄຳ ແລະຫຼຽນໂລຫະເຄິ່ງມາສົກ
ຊຸບຄຳ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຍ່ອມບໍ່ຊົງຜາກົດແນວນີ້ແດ່

ພຣະຜູ້ມີພຣະພາກເຈົ້າຊົງເຝິກພຣະອົງແລ້ວ ຍ່ອມຊົງຜາກົດໂດຍເພດແຫ່ງຜູ້ເຝິກແລ້ວ ຊົງສະງົບແລ້ວ ຍ່ອມຊົງຜາກົດໂດຍເພດແຫ່ງຜູ້ສະງົບແລ້ວ ຊົງເຂົ້າໄປສະງົບແລ້ວ ຍ່ອມຊົງຜາກົດໂດຍເພດແຫ່ງຜູ້ເຂົ້າໄປສະງົບແລ້ວ ຊົງດັບແລ້ວ ຍ່ອມຊົງຜາກົດໂດຍເພດແຫ່ງຜູ້ດັບແລ້ວ ໂດຍຄວາມຈິງແທ້ ຖ່ອງແທ້ ແນ່ນອນ ບໍ່ວິປະຣິດ ຕາມສະພາບ ພຣະຜູ້ມີພຣະພາກເຈົ້າ ທັງຫຼາຍຜູ້ຊົງເປັນພຣະພຸດທະເຈົ້າ ຜູ້ຊົງມີອິລິຍາບົດຕາມປົກກະຕິ ຊົງສົມບູນດ້ວຍປະນິທິ (ການຕັ້ງຄວາມປາຖະໜາ) ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸຍ່ອມຜາກົດ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າມີພຣະກຽດອັນບໍລິສຸດ ຊຶ່ງພຽບພ້ອມດ້ວຍພຣະກິດຕິສັບ ແລະ ຄວາມສັນເສີນ ຊຶ່ງເປັນເຊັ່ນນີ້ ເປັນເຊັ່ນນັ້ນ ແລະຊຶ່ງເປັນຍິ່ງກວ່ານັ້ນໃນພົບນາກ ພົບຄຸດ ພົບຍັກ ພົບອະສູນ ພົບຄົນທັບ ພົບທ້າວມະຫາຣາດ ພົບພຣະອິນ ພົບພຣະພົມ ແລະພົບເທບ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸຍ່ອມຜາກົດ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊຶ່ງພຽບພ້ອມດ້ວຍພະລະ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຍ່ອມຊຶ່ງຜາກົດ ຄື ຄົນຮູ້ຈັກ ຄົນເຂົ້າໃຈໄດ້ ດ້ວຍພຣະເຕຊະທຳ ພຣະພະລະທຳ ພຣະຄຸນນະທຳ ພຣະວິຣິຍະ ແລະພຣະປັນຍາ (ສົມຈິງດັ່ງພາສິດວ່າ)

ສັດຕະບຸຣຸດຍ່ອມຜາກົດໃນບ່ອນໄກ
ເໝືອນພູເຂົາຫິມະພານ ສັນນັ້ນ
ອະສັດຕະບຸຣຸດທັງຫຼາຍ ໃນບ່ອນນີ້ ຍ່ອມບໍ່ຜາກົດ
ເໝືອນລູກສອນທີ່ຍິງໄປເວລາກາງຄືນ ສັນນັ້ນ

ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸຍ່ອມຜາກົດ ແນວນີ້ແດ່

## ວ່າດ້ວຍພຣະຈັກຂຸ ໕ ຊະນິດ

ຄຳວ່າ ຜູ້ມີພຣະຈັກຂຸ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸ ດ້ວຍພຣະຈັກຂຸ ໕ ຊະນິດ ຄື

໑. ມີພຣະຈັກຂຸດ້ວຍ ມັງສະຈັກຂຸແດ່
໒. ມີພຣະຈັກຂຸດ້ວຍ ທິບພະຈັກຂຸແດ່
໓. ມີພຣະຈັກຂຸດ້ວຍ ປັນຍາຈັກຂຸແດ່
໔. ມີພຣະຈັກຂຸດ້ວຍ ພຸດທະຈັກຂຸແດ່
໕. ມີພຣະຈັກຂຸດ້ວຍ ສະມັນຕະຈັກຂຸແດ່

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍມັງສະຈັກຂຸ ເປັນແນວໃດ?

ຄື ໃນພຣະມັງສະຈັກຂຸຂອງພຣະຜູ້ມີພຣະພາກເຈົ້າ ມີສີຢູ່ ໕ ສີ ຄື (໑) ສີຂຽວ (໒) ສີເຫຼືອງ (໓) ສີແດງ (໔) ສີດຳ (໕) ສີຂາວ ໃນບ່ອນທີ່ມີກັນພຣະເນດຂຶ້ນ ມີສີຂຽວ ຂຽວສະນິດ ໜ້າຊົມ ໜ້າເບິ່ງ ເໝືອນດອກຜັກຕົບ ຕໍ່ຈາກນັ້ນ ກໍເປັນສີເຫຼືອງ ເຫຼືອງສະນິດ ສີເໝືອນຄຳ ໜ້າຊົມ ໜ້າເບິ່ງ ເໝືອນດອກກັນນິກາ ເບົ້າພຣະເນດທັງສອງຂ້າງຂອງພຣະຜູ້ມີພຣະພາກເຈົ້າ ມີສີແດງ ແດງສະນິດ ໜ້າຊົມ ໜ້າເບິ່ງ ເໝືອນສີປີກແມງຄັບ ກາງດວງພຣະເນດ ສີດຳ ດຳເຂັ້ມ ບໍ່ເສົ້າໝອງ ສະນິດ ໜ້າຊົມ ໜ້າເບິ່ງ ເໝືອນສີລົ້ມມໍດຳ ຕໍ່ຈາກນັ້ນ ເປັນສີຂາວ ຂາວສະ

ນິດ ເປ່ງປັ່ງ ຂາວນວນ ໜ້າຊື່ນ ໜ້າເບິ່ງ ເໝືອນສີດາວປະກາຍພຶກ ພຣະຜູ້ມີ- ພຣະພາກເຈົ້າມີພຣະມັງສະຈັກຂຸນັ້ນຢູ່ໂດຍປົກກະຕິ ເນື່ອງໃນພຣະອັດຕະພາບ ເກີດດ້ວຍສຸດຈະຣິດກຳທີ່ຊົງສັ່ງສົມມາໃນພົບກ່ອນ ຊົງແນມເຫັນຕະຫຼອດ ໑ ໂຍດໂດຍຣອບ ທັງກາງເວັນແລະ ກາງຄືນ ແມ່ນໃນເວລາທີ່ມີຄວາມມືດປະກອບດ້ວຍອົງ ໔ ຄື (໑) ດວງອາທິດຕົກໄປແລ້ວ (໒) ເປັນວັນອຸໂປສົດຂ້າງແຮມ (໓) ປ່າຣົກທຶບ (໔) ມີເມກກ້ອນໃຫຍ່ຟຸດຂຶ້ນມາ ໃນຄວາມມືດທີ່ປະກອບດ້ວຍອົງ ໔ ຢ່າງນີ້ ພຣະອົງກໍຊົງແນມເຫັນໄດ້ຕະຫຼອດ ໑ ໂຍດໂດຍຮອບ ບໍ່ມີຫຼຸບ ບານປະຕູ ກຳແພງ ພູເຂົາ ກໍໄມ້ ຫຼືເຄືອເຂົາມາປິດກັ້ນການເຫັນຮູບທັງຫຼາຍໄດ້ ຫາກບຸກຄົນເອົາງາເມັດດຽວເຮັດເຄື່ອງໝາຍແລ້ວໃສ່ລົງໃນກວຽນ ບັນທຸກງາ ພຣະຜູ້ມີພຣະພາກເຈົ້າກໍຊົງສາມາດຈັບເອົາງາເມັດນັ້ນຂຶ້ນມາໄດ້ ພຣະມັງສະຈັກຂຸຕາມປົກກະຕິຂອງພຣະຜູ້ມີພຣະພາກເຈົ້າບໍລິສຸດແນວນີ້ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີ

ພຣະຈັກຂຸດ້ວຍມັງສະຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍທິບພະຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງເຫັນໝູ່ສັດ ເຊິ່ງກຳລັງຈຸຕິ ກຳລັງອຸບັດ ຊົ່ວ ປະນີດ ຜິວພັນດີ ຜິວພັນຊາມ ໄປດີ ຕົກຍາກ ດ້ວຍທິບພະຈັກຂຸອັນມົດຈົດລ່ວງຈັກຂຸມະນຸດ ຊົງຮູ້ໝູ່ສັດຜູ້ເປັນໄປຕາມກຳວ່າ ສັດເຫຼົ່ານີ້ແລນໍ ປະກອບດ້ວຍກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຕິຕຽນພຣະອະຣິຍະ ເປັນມິດສາທິດຖິ ຍຶດຖືການກະທຳ ດ້ວຍອຳນາດມິດສາທິດຖິ ຫຼັງຈາກຕາຍແລ້ວ ສັດເຫຼົ່ານັ້ນກໍເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ສັດເຫຼົ່ານີ້ປະກອບດ້ວຍກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ບໍ່ຕິຕຽນພຣະອະຣິຍະ ເປັນສຳມາທິດຖິ ຍຶດຖືການກະທຳດ້ວຍອຳນາດສຳມາທິດຖິ ຫຼັງຈາກຕາຍແລ້ວສັດເຫຼົ່ານັ້ນກໍເຂົ້າເຖິງສຸກຄະຕິໂລກສະຫວັນ ພຣະຜູ້ມີພຣະພາກເຈົ້າຊົງເຫັນໝູ່ສັດ ເຊິ່ງກຳລັງຈຸຕິ ກຳລັງ ອຸບັດ ຊົ່ວ ປະນີດ ຜິວພັນດີ ຜິວພັນຊາມ ໄປດີ ຕົກຍາກ ດ້ວຍທິບພະຈັກຂຸອັນມົດຈົດ ລ່ວງຈັກຂຸມະນຸດ ຊົງຮູ້ໝູ່ສັດຜູ້ເປັນໄປຕາມກຳ ແລະພຣະຜູ້ມີພຣະພາກເຈົ້າເມື່ອຊົງປະສົງ ເພິ່ງຊົງເຫັນໄດ້ແມ່ນ ໑ ໂລກທາດ ຯລຯ ແມ່ນ ໒ ໂລກທາດ ຯລຯ ແມ່ນ ໓ ໂລກທາດ ຯລຯ ແມ່ນ ໔ ໂລກທາດ ຯລຯ ແມ່ນ ໕ ໂລກທາດ ຯລຯ ແມ່ນ ໑໐ ໂລກທາດ ຯລຯ ແມ່ນ ໒໐ ໂລກທາດ ຯລຯ ແມ່ນ ໓໐ ໂລກທາດ ຯລຯ ແມ່ນ ໔໐ ໂລກທາດ ຯລຯ ແມ່ນ ໕໐ ໂລກທາດ ຯລຯ ແມ່ນ ໑໐໐ ໂລກທາດ ຯລຯ ແມ່ນໂລກທາດຂະໜາດນ້ອຍປະກອບດ້ວຍ ໑,໐໐໐ ຈັກກະວານ ຯລຯ ແມ່ນໂລກທາດຂະໜາດກາງປະກອບດ້ວຍ ໒,໐໐໐ ຈັກກະວານ ຯລຯ ແມ່ນໂລກທາດຂະໜາດໃຫຍ່ປະກອບດ້ວຍ ໓,໐໐໐ ຈັກກະວານ ຯລຯ ແມ່ນໂລກທາດທີ່ປະກອບດ້ວຍຫຼາຍພັນຈັກກະວານ ພຣະຜູ້ມີພຣະພາກເຈົ້າຊົງປະສົງພຽງໃດກໍເພິ່ງຊົງເຫັນໄດ້ພຽງນັ້ນ ທິບພະຈັກຂຸຂອງພຣະຜູ້ມີພຣະພາກເຈົ້າບໍລິສຸດແນວນີ້ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີພຣະຈັກຂຸດ້ວຍທິບພະຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍປັນຍາຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະປັນຍາຫຼາຍ ມີພຣະປັນຍາກວ້າງຂວາງ ມີພຣະປັນຍາອາດຫານ ມີພຣະປັນຍາວ່ອງໄວ ມີພຣະປັນຍາສຸງບຄົມ ມີພຣະປັນຍາເພີກຖອນ ກິເລດໄດ້ ຊົງສະຫຼາດໃນປະເພດແຫ່ງປັນຍາ ມີພຣະຍານແຕກສານ ຊົງບັນລຸປະຕິສຳພິທາ ຊົງບັນລຸເວສາຣັດຊະຍານ ໔ ຊົງເປັນຜູ້ຊົງທະສະພະລະຍານ ຊົງເປັນບຸຣຸດອົງອາດ ຊົງເປັນ ບຸຣຸດເໝືອນຣາດຊະສີ ຊົງເປັນບຸຣຸດເໝືອນນາກ ຊົງເປັນບຸຣຸດອາຊາໄນ ຊົງເປັນບຸຣຸດຜູ້ເອົາ ທຸຣະ ມີພຣະຍານຫາບ່ອນສຸດບໍ່ໄດ້ ມີພຣະເດດຫາບ່ອນສຸດບໍ່ໄດ້ ມີພຣະຍົດຫາບ່ອນສຸດບໍ່ໄດ້ ຊົງມັ່ງຄັ່ງມີຊັບຫຼາຍ ຊົງມີປັນຍາເປັນຊັບ ຊົງເປັນຜູ້ນຳ ເປັນຜູ້ນຳໄປໂດຍວິເສດ ເປັນຜູ້ຕາມແນະນຳ ຊົງໃຫ້ຮູ້ຈັກປະໂຫຍດ ໃຫ້ພິນິດພິຈາລະນາ ຊົງເພ່ງປະໂຫຍດ ຊົງເຮັດໃຫ້ເຫຼື້ອມໃສໄດ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງເຮັດມັກ ທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊົງເຮັດມັກ ທີ່ຍັງບໍ່ເກີດພ້ອມໃຫ້ເກີດພ້ອມ ຕັດບອກມັກທີ່ຍັງບໍ່ໄດ້ຕັດບອກ ຊົງຮູ້ຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ແລະ ສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ດຳເນີນໄປຕາມມັກຢູ່ໃນບັດນີ້ ຈະພຸງບພ້ອມດ້ວຍສີລາທິຄຸນໃນພາຍຫຼັງ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ມີພຣະຈັກຂຸ ມີພຣະທຳ ມີພຣະຍານ ເປັນເໝືອນພຣະພົມ ຕັດ ບອກ ນຳຄວາມໝາຍອອກມາ ປະທານອະມະຕະທຳ ເປັນພຣະທຳສາມີ ເປັນພຣະຕະຖາຄົດ ບໍ່ມີສິ່ງທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຍັງບໍ່ຊົງຮູ້ ບໍ່ຊົງເຫັນ ບໍ່ຊົງຮູ້ແຈ້ງ ບໍ່ຊົງເຮັດໃຫ້ແຈ້ງ ບໍ່ໄດ້ຊົງຖືກຕ້ອງດ້ວຍປັນຍາ ທຳທັງປວງ ລວມທັງອະດີດ ອະນາຄົດ ແລະປັດຈຸບັນ ຍ່ອມມາສູ່ຄອງສະເພາະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ໂດຍອາການທັງປວງ ທຳມະດາປະໂຫຍດທີ່ຄວນແນະນຳແນວໃດແນວໜຶ່ງ ເປັນທຳທີ່ຄວນຮູ້ມີຢູ່ ຄື ປະໂຫຍດຕົນ ປະໂຫຍດຜູ້ອື່ນ ຫຼື ປະໂຫຍດທັງສອງຝ່າຍ ປະໂຫຍດໃນພົບປັດຈຸບັນ ຫຼື ປະໂຫຍດໃນພົບໜ້າ ປະໂຫຍດຕື້ນ ຫຼື ປະໂຫຍດເລິກ ປະໂຫຍດລີ້ລັບຫຼືປະໂຫຍດປິດບັງ ປະໂຫຍດທີ່ຄວນແນະນຳ ຫຼື ປະໂຫຍດທີ່ແນະນຳແລ້ວ ປະໂຫຍດທີ່ບໍ່ມີໂທດ ຫຼື ປະໂຫຍດທີ່ບໍ່ມີກິເລດ ປະໂຫຍດທີ່ຜ່ອງແຜ້ວ ຫຼື ປະໂຫຍດຢ່າງຍິ່ງ ປະໂຫຍດທັງໝົດນັ້ນຍ່ອມເປັນໄປພາຍໃນພຣະພຸດທະຍານ

ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ບໍ່ຕິດຂັດໃນອະດີດ ອະນາຄົດ ປັດຈຸບັນ ກາຍຍະກຳ ວະຈີກຳ ມະໂນກຳທຸກຢ່າງ ຍ່ອມເປັນໄປຕາມພຣະຍານຂອງພຣະຜູ້ມີພຣະພາກ ພຸດທະເຈົ້າ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີພຽງນັ້ນ ພຣະຍານ ມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນບົດທຳທີ່ຄວນແນະນຳ ທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນ ຕັ້ງຢູ່ໃນສ່ວນ

ສຸດຮອບຂອງກັນແລະກັນ ເໝືອນຊັ້ນແຫ່ງຜະອົບ ໔ ຊັ້ນ ເຕັງກັນແຈບພໍດີ ຊັ້ນຜະອົບດ້ານລຸ່ມ ກໍບໍ່ເກີນດ້ານເທິງ ຊັ້ນຜະອົບ ດ້ານເທິງກໍບໍ່ເກີນດ້ານລຸ່ມ ຊັ້ນຜະອົບທັງ ໔ ຍ່ອມວາງປະກົບກັນທີ່ສ່ວນສຸດໂດຍຮອບຂອງກັນແລະກັນສັນໃດ ບົດທຳທີ່ຄວນແນະນຳ ແລະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າກໍຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນສັນນັ້ນຄືກັນ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີຢູ່ພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນກວ່າບົດທຳທີ່ຄວນແນະນຳທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນ ຍ່ອມຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ຍ່ອມເປັນໄປໃນທຳທັງປວງ

ທຳທັງປວງນັບເນື່ອງດ້ວຍຄວາມນຶກ ນັບເນື່ອງດ້ວຍຄວາມຫວັງ ນັບເນື່ອງດ້ວຍມະນະສິການ ນັບເນື່ອງດ້ວຍຈິດຕຸບບາດຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າຍ່ອມເປັນໄປໃນສັດທັງປວງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ອັດທະຍາໄສອະນຸໄສ ຈະຣິດ ອະທິມຸດຕິ ຂອງເຫຼົ່າສັດທຸກຈຳພວກ ຊົງຮູ້ຈັກເຫຼົ່າສັດຜູ້ມີກິເລດເໝືອນທຸລີໜ້ອຍໃນປັນຍາຈັກຂຸ ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ເປັນພັບພະສັດເປັນອະພັບພະສັດ ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດ ຍ່ອມເປັນໄປພາຍໃນພຣະພຸດທະຍານ

ປາແລະເຕົ່າຊະນິດໃດຊະນິດໜຶ່ງ ລວມທັງປາຕິມິ ປາຕິມິງຄະລະ ແລະ ປາຕິມິຕິມິງຄະລະ ຍ່ອມເປັນໄປຢູ່ພາຍໃນມະຫາສະມຸດ ສັນໃດ ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍ່ອມເປັນໄປພາຍໃນ ພຣະຍານຂອງພຣະພຸດທະເຈົ້າ ສັນນັ້ນຄືກັນ ນົກຊະນິດໃດຊະນິດໜຶ່ງ ລວມທັງຄຸດນາມວ່າ ເວນໄຕຍະຍ່ອມບິນໄປໃນຫ້ອງແຫ່ງອາກາດ ສັນໃດ ພຣະພຸດທະສາວົກທັງຫຼາຍ ຜູ້ສະເໝີກັບ ພຣະສາຣີບຸດດ້ວຍປັນຍາ ຍ່ອມເປັນໄປໃນສ່ວນແຫ່ງພຣະພຸດທະຍານ ສັນນັ້ນຄືກັນ ພຣະພຸດທະຍານຍ່ອມແຜ່ຄອບຄຸມປັນຍາຂອງເທວະດາ ແລະ ມະນຸດຢູ່

ເຫຼົ່າບັນດິດຜູ້ເປັນກະສັດ ເປັນພາມ ເປັນຄະຫະບໍດີ ເປັນສະມະນະ ຜູ້ມີປັນຍາ ລະອຽດຮູ້ວາທະຂອງຜູ້ອື່ນ ເໝືອນນາຍຂະມັງທະນູສາມາດຍິງເນື້ອຊາຍໄດ້ ເໝືອນຈະທ່ຽວ ທຳລາຍທິດຖິຂອງຜູ້ອື່ນດ້ວຍປັນຍາຕົນ ບັນດິດເຫຼົ່ານັ້ນພາກັນປຸງແຕ່ງບັນຫາ ຍ່ອມເຂົ້າໄປເຝົ້າພຣະຕະຖາຄົດ ທູນຖາມບັນຫາທີ່ລີ້ລັບ ແລະ ປິດບັງ ບັນຫາເຫຼົ່ານັ້ນ ທີ່ພຣະຜູ້ມີພຣະພາກເຈົ້າຊົງຊັກໄຊ້ ແລະ ຕັດແກ້ແລ້ວ ເປັນບັນຫາມີເຫດໃຫ້ຊົງສະແດງ ບັນດິດເຫຼົ່ານັ້ນຖືກດຶງດູດດ້ວຍການວິສັດ

ຊະນາບັນທາ ຈຶ່ງເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າ ໂດຍທີ່ແທ້ພຣະຜູ້ມີພຣະພາກເຈົ້າ ຍ່ອມຊົງຮຸ່ງເຮືອງຍິ່ງດ້ວຍພຣະປັນຍາໃນໝູ່ຄົນເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີ ພຣະຈັກຂຸດ້ວຍປັນຍາຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍພຸດທະຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າເມື່ອຊົງກວດເບິ່ງສັດໂລກດ້ວຍພຸດທະຈັກຂຸ ໄດ້ຊົງເຫັນສັດທັງຫຼາຍຜູ້ມີກິເລດເໝືອນທຸລີໜ້ອຍໃນປັນຍາຈັກຂຸ ຜູ້ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ບາງພວກເປັນຜູ້ເຫັນໂທດແລະໄພໃນປະຣະໂລກຢູ່ກໍມີ ບາງພວກເປັນຜູ້ບໍ່ເຫັນໂທດ ແລະ ໄພໃນປະຣະໂລກຢູ່ກໍມີ ເໝືອນໃນກໍບົວຂຽວ ໃນກໍບົວແດງ ຫຼື ໃນກໍບົວຂາວ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳ ຈະເລີນໃນນ້ຳ ຂຶ້ນຕາມນ້ຳ ຈົມຢູ່ໃນນ້ຳ ແລະ ນ້ຳຫຼໍ່ລ້ຽງໄວ້ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳຈະເລີນໃນນ້ຳຕັ້ງຢູ່ສະເໝີຜີວນ້ຳ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳ ຈະເລີນໃນນ້ຳ ຜຸດຂຶ້ນພົ້ນຣະດັບນ້ຳ ນ້ຳບໍ່ຕິດເປື້ອນຢູ່ເລີຍ ສັນໃດ

ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງກວດເບິ່ງສັດໂລກດ້ວຍພຸດທະຈັກຂຸ ໄດ້ຊົງເຫັນສັດທັງຫຼາຍຜູ້ມີກິເລດເໝືອນທຸລີໜ້ອຍໃນປັນຍາຈັກຂຸ ຜູ້ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ບາງພວກເປັນຜູ້ເຫັນໂທດ ແລະ ໄພໃນປະຣະໂລກຢູ່ກໍມີ ບາງພວກເປັນຜູ້ທີ່ບໍ່ເຫັນໂທດ ແລະ ໄພໃນປະຣະໂລກຢູ່ກໍມີ ສັນນັ້ນຄືກັນ

ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ບຸກຄົນນີ້ມີຣາຄະຈະຣິດ ບຸກຄົນນີ້ມີໂທສະຈະຣິດ ບຸກຄົນນີ້ມີໂມຫະຈະຣິດ ບຸກຄົນນີ້ມີວິຕົກຈະຣິດ ບຸກຄົນນີ້ມີສັດທາຈະຣິດ ບຸກຄົນນີ້ມີຍານະຈະຣິດ ພຣະຜູ້ມີພຣະພາກເຈົ້າຍ່ອມຕັດອະສຸພະກະຖາແກ່ບຸກຄົນຣາຄະຈະຣິດ ຕັດການຈະເລີນເມດຕາແກ່ບຸກຄົນໂທສະຈະຣິດ ຍ່ອມຊົງແນະນຳບຸກຄົນໂມຫະຈະຣິດ ໃຫ້ດຳຣົງຢູ່ໃນການຮ່ຳຮຽນ ການໄຕ່ຖາມ ການຟັງທຳຕາມການ ການສົນທະນາທຳຕາມການ ການຢູ່ຮ່ວມກັບຄູຍ່ອມຕັດອານາປານັດສະຕິແກ່ບຸກຄົນວິຕົກຈະຣິດ ຕັດບອກນິມິດທີ່ໜ້າເຫຼື້ອມໃສ ຄວາມຕັດສະຮູ້ຊອບຂອງພຣະພຸດທະເຈົ້າ ຄວາມເປັນທຳດີແຫ່ງພຣະທຳ ການປະຕິບັດຊອບຂອງພຣະສົງ ແລະສິນຂອງຕົນທີ່ໜ້າເຫຼື້ອມໃສແກ່ບຸກຄົນສັດທາຈະຣິດ ຍ່ອມຕັດທຳອັນເປັນນິມິດແຫ່ງວິປັດ ສະນາ ມີອາການບໍ່ທ່ຽງ ມີອາການເປັນທຸກ ມີອາການເປັນອະນັດຕາແກ່ບຸກຄົນຍານະຈະຣິດ (ສົມຈິງດັ່ງຄາຖາປະພັນວ່າ)

ຂ້າແດ່ ພຣະອົງຜູ້ມີປັນຍາດີ ມີສະມັນຕະຈັກຂຸ

ບຸຣຸດຜູ້ຢືນຢູ່ເທິງຍອດພູເຂົາສິລາລ້ວນ
ເພິ່ງເຫັນໝູ່ຊົນໂດຍຮອບ ແມ່ນສັນໃດ
ພຣະອົງຜູ້ໝົດຄວາມໂສກແລ້ວ
ໂຜດສະເດັດຂຶ້ນສູ່ຜາສາດ ຄື ທຳ
ຈັກໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມເສົ້າໂສກ
ແລະ ຖືກຊາດຊະຣາຄອບງຳໄດ້ຊັດເຈນ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີພຣະຈັກຂຸດ້ວຍພຸດທະຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍສະມັນຕະຈັກຂຸ ເປັນແນວໃດ?

ຄື ພຣະສັບພັນຍຸຕະຍານ ຕັດຮຽກວ່າ ສະມັນຕະຈັກຂຸ ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍ ພຣະສັບພັນຍຸຕະຍານ (ສົມຈິງດັ່ງຄາຖາປະພັນວ່າ)

ສິ່ງໃດ ໆ ໃນໄຕຣໂລກທາດນີ້
ພຣະປັນຍາຈັກຂຸຂອງພຣະຕະຖາຄົດນັ້ນ ບໍ່ເຫັນ ບໍ່ມີເລີຍ
ອັນໜຶ່ງ ທຳມະຊາດອັນໃດ ໆ ທີ່ຄວນຮູ້
ພຣະພຸດທະຍານບໍ່ຮູ້ແຈ້ງກໍບໍ່ມີ
ທຳມະຊາດທີ່ຄວນແນະນຳໃດມີຢູ່
ພຣະຕະຖາຄົດໄດ້ຊົງຮູ້ທຳມະຊາດທີ່ຄວນແນະນຳນັ້ນທັງໝົດ

ຍ້ອນເຫດນັ້ນ ພຣະຕະຖາຄົດຈຶ່ງຊື່ວ່າ ຜູ້ມີສະມັນຕະຈັກຂຸ

ພຣະຜູ້ມີພຣະພາກເຈົ້າຊື່ວ່າມີພຣະຈັກຂຸດ້ວຍສະມັນຕະຈັກຂຸ ເປັນແນວນີ້ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ ຍ່ອມຜາກົດ

ຄຳວ່າ ຊົງກຳຈັດຄວາມມືດທັງປວງ ອະທິບາຍວ່າ ຊົງບັນເທົາ ເຮັດໃຫ້ເບົາບາງ ລົດລະ ກຳຈັດ ຄື ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມືດຍ້ອນຣາຄະ ຄວາມມືດຍ້ອນໂທສະ ຄວາມມືດຍ້ອນໂມຫະ ຄວາມມືດຍ້ອນມານະ ຄວາມມືດຍ້ອນທິດຖິ ຄວາມມືດຍ້ອນກິເລດ ຄວາມມືດຍ້ອນທຸດຈະຣິດທັງປວງ ເຊິ່ງເຮັດໃຫ້ເປັນຄົນຕາບອດ ເຮັດໃຫ້ບໍ່ມີຈັກຂຸເຮັດໃຫ້ບໍ່ມີຍານ ອັນດັບປັນຍາ ເປັນໄປໃນຝ່າຍແຫ່ງຄວາມລຳບາກ ບໍ່ເປັນໄປເພື່ອນິບພານ ລວມຄວາມວ່າ ຊົງກຳຈັດຄວາມມືດທັງປວງ

## ວ່າດ້ວຍພຣະພຸດທະເຈົ້າຊົງເປັນເອກບຸຣຸດ

ຄຳວ່າ ຊົງເປັນເອກບຸຣຸດ ບັນລຸຄວາມຍິນດີແລ້ວ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນສ່ວນແຫ່ງການບັນພະຊາ
ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ບໍ່ມີໝູ່
ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ຊົງລະຕັນຫາໄດ້
ຊົງປາສະຈາກຣາຄະໂດຍໝົດສິ້ນ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ
ຊົງປາສະຈາກໂທສະໂດຍໝົດສິ້ນ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ
ຊົງປາສະຈາກໂມຫະໂດຍໝົດສິ້ນ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ
ຊົງປາສະຈາກກິເລດໂດຍໝົດສິ້ນ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ

ສະເດັດເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ
ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງ ເປັນເອກບຸຣຸດ ຍ້ອນສ່ວນແຫ່ງການບັນພະຊາ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າ ຍັງຊົງໜຸ່ມແໜ້ນ ມີພຣະເກສາດຳສະນິດດີ ພຽບພ້ອມດ້ວຍຄວາມໜຸ່ມສະກັນໃນປະຖົມໄວ ເມື່ອພຣະຊະນົກແລະພຣະຊົນນີ ມີນ້ຳພຣະເນດນອງ ພຣະພັກກັນແສງຮ້ອງໄຫ້ ບໍ່ປາຖະໜາ (ໃຫ້ຊົງບວດ) ຊົງລະໝູ່ພຣະຍາດພີ່ນ້ອງ ຊົງຕັດຄວາມກັງວົນດ້ວຍພຣະຍົດ ຄວາມກັງວົນດ້ວຍພຣະໂອຣົດ ແລະ ພຣະມະເຫສີ ຄວາມກັງວົນດ້ວຍພຣະຍາດພີ່ນ້ອງ ຄວາມກັງວົນດ້ວຍພຣະສະຫາຍ ແລະ ອຳມາດ (ແລະ) ຄວາມກັງວົນດ້ວຍການສັ່ງສົມທຸກຢ່າງ ຊົງປົງພຣະເກສາ ແລະ ພຣະມັດສຸ ຊົງຄອງຜ້າກາສາວະ ສະເດັດອອກບວດຈາກພຣະຣາດຊະວັງເປັນບັນພະຊິດ ຊົງເຂົ້າເຖິງຄວາມເປັນຜູ້ບໍ່ມີກັງວົນ ສະເດັດທ່ຽວໄປ ປະທັບຢູ່ ຊົງປ່ຽນອິລິຍາບົດ ຊົງເປັນໄປ ຊົງຮັກສາພຣະຊົນຊີບ ຊົງດຳເນີນໄປ ຊົງຍັງຊີວິດໃຫ້ດຳເນີນໄປຕາມລຳພັງພຣະອົງດຽວ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນສ່ວນແຫ່ງການບັນພະຊາ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າ ຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ບໍ່ມີໝູ່ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງບວດແລ້ວແນວນີ້ ຊົງໃຊ້ສອຍເສນາສະນະທີ່ເປັນປ່າທຶບ ແລະ ປ່າເລິ່າອັນສະຫງັດ ມີສຽງໜ້ອຍ ມີສຽງອືກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກຕາມລຳພັງພຣະອົງດຽວ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນສະເດັດໄປພຣະອົງດຽວ ປະທັບຢືນພຣະອົງດຽວ ປະທັບນັ່ງພຣະອົງດຽວ ບັນທົມພຣະອົງດຽວ ສະເດັດເຂົ້າສູ່ໝູ່ບ້ານເພື່ອບິນທະບາດພຣະອົງດຽວ ສະເດັດກັບພຣະອົງດຽວ ປະທັບນັ່ງໃນບ່ອນລັບພຣະອົງດຽວ ຕັ້ງພຣະຫະໄທຈົງກົມພຣະອົງດຽວ ສະເດັດທ່ຽວໄປ ປະທັບຢູ່ ຊົງປ່ຽນອິລິຍາບົດ ຊົງເປັນໄປ ຊົງຮັກສາພຣະ

ຊົບຊີບ ຊົງດຳເນີນໄປ ຊົງຍັງຊີວິດໃຫ້ດຳເນີນໄປຕາມລຳພັງພຣະອົງດຽວ ພຣະຜູ້ມີພຣະພາກ ເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ບໍ່ມີໝູ່ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ຊົງລະຕັນຫາໄດ້ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນຜູ້ຊົງເປັນເອກບຸຣຸດ ບໍ່ມີໝູ່ທີ່ສອງແນວນີ້ ບໍ່ຊົງ ຜະໝາດ ຊົງມີຄວາມພຽນ ຕັ້ງພຣະທະໄທເດັດດ່ຽວຢູ່ ຊົງຕັ້ງຄວາມພຽນຄັ້ງໃຫຍ່ ຢູ່ເຫງົ້າຕົ້ນໂພ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ຊົງກຳຈັດມານພ້ອມທັງເສນາຜູ້ຊົ່ວຮ້າຍ ກີດກັນບໍ່ໃຫ້ມະຫາຊົນຫຼຸດພົ້ນ ເປັນເຜົ່າພັນຜູ້ຜະໝາດ ຊົງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຕັນຫາທີ່ ເປັນເໝືອນຕາໜ່າງ ຊ່ານໄປເກາະກ່ຽວອາລົມ

(ສົມຈິງດັ່ງຄາຖາປະພັນວ່າ)

ບຸກຄົນມີຕັນຫາເປັນໝູ່ ທ່ອງທ່ຽວໄປຕະຫຼອດການອັນຍາວນານ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດທີ່ມີສະພາວະແນວນີ້ ແລະ ສະພາວະແນວອື່ນ
ພິກຂຸຮູ້ໂທດນີ້ ຮູ້ຕັນຫາເປັນເຫດໃຫ້ເກີດແຫ່ງທຸກ
ເພິ່ງເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ ມີສະຕິສຳປະຊັນຍະຢູ່

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ຊົງລະຕັນຫາໄດ້ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າ ຊົງປາສະຈາກຣາຄະໂດຍໝົດສິ້ນ ຈຶ່ງຊື່ວ່າ ຊົງເປັນເອກບຸຣຸດ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າ ຊົງປາສະຈາກຣາຄະໂດຍໝົດສິ້ນ ຍ້ອນເປັນຜູ້ລະຣາຄະໄດ້ ແລ້ວ ຈຶ່ງຊື່ວ່າ ຊົງເປັນເອກບຸຣຸດ

ຊົງປາສະຈາກໂທສະໂດຍໝົດສິ້ນ ຍ້ອນເປັນຜູ້ລະໂທສະໄດ້ແລ້ວ ຈຶ່ງຊື່ວ່າ ຊົງເປັນເອກ ບຸຣຸດ

ຊົງປາສະຈາກໂມຫະໂດຍໝົດສິ້ນ ຍ້ອນເປັນຜູ້ລະໂມຫະໄດ້ແລ້ວ ຈຶ່ງຊື່ວ່າ ຊົງເປັນເອກ ບຸຣຸດ

ຊົງປາສະຈາກກິເລດໂດຍໝົດສິ້ນ ຍ້ອນເປັນຜູ້ລະເຫຼົ່າກິເລດໄດ້ແລ້ວ ຈຶ່ງຊື່ວ່າ ຊົງເປັນ ເອກບຸຣຸດ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າສະເດັດເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າ ຊົງເປັນເອກບຸຣຸດ ເປັນ ແນວໃດ?

ຄື ສະຕິປັດຖານ ໔ ສໍາມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດ ຊົງ ໗ ອະຣິຍະມັກມີອົງ ໘ ຕັດຮຽກວ່າ ທາງສາຍເອກ

(ສົມຈິງດັ່ງຄາຖາປະພັນວ່າ)

ພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເຫັນທໍາອັນເປັນສ່ວນທີ່ສຸດສິ້ນແຫ່ງຊາດ
ຊົງອະນຸເຄາະດ້ວຍຄວາມເກື້ອກູນ
ຊົງຮູ້ຈັກມັກ ອັນເປັນທາງສາຍເອກ
ເຊິ່ງເຫຼົ່າບັນດິດໄດ້ຂ້າມມາກ່ອນແລ້ວ
ຈັກຂ້າມ ແລະກໍາລັງຂ້າມໂອຄະໄດ້ດ້ວຍມັກນີ້

ພຣະຜູ້ມີພຣະພາກເຈົ້າສະເດັດເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ອະນຸດຕະຣະສໍາມາສໍາໂພທິຍານ ລໍາພັງພຣະອົງດຽວຈຶ່ງ ຊື່ວ່າຊົງເປັນເອກບຸຣຸດ ເປັນແນວໃດ?

ຄື ຍານໃນມັກທັງ ໔ ປັນຍາ ປັນຍິນຊີ ປັນຍາພະລະ ທໍາມະວິຈະຍະສໍາໂພດຊົງ ປັນຍາເຄື່ອງພິຈາລະນາ ປັນຍາເຄື່ອງເຫັນແຈ້ງ ສໍາມາທິດຖິ ຕັດຮຽກວ່າ ໂພທິ ດ້ວຍໂພທິຍານນັ້ນ ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທໍາທັງປວງເປັນອະນັດຕາ ຯລຯ

ຕັດສະຣູ້ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຯລຯ ຕັດສະຣູ້ວ່າ ຍ້ອນຊາດເປັນປັດໄຈ ຊະຣາ ແລະ ມໍຣະນະຈຶ່ງມີ ຯລຯ ຍ້ອນອະວິດຊາດັບສັງຂານຈຶ່ງດັບ ຯລຯ ຍ້ອນຊາດດັບ ຊະຣາ ແລະ ມໍຣະນະຈຶ່ງດັບ ຯລຯ ຕັດສະຣູ້ວ່າ ນີ້ທຸກ ຯລຯ ນີ້ທຸກຂະສະມຸໄທ ຯລຯ ນີ້ທຸກຂະນິໂຣທະ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ຯລຯ

ຕັດສະຣູ້ວ່າ ເຫຼົ່ານີ້ອາສະວະ ຯລຯ ນີ້ອາສະວະສະມຸໄທ ຯລຯ ນີ້ອາສະວະນິໂຣທະ ຯລຯ ນີ້ອາສະວະນິໂຣທະຄາມິນີປະຕິປະທາ ຯລຯ

ຕັດສະຣູ້ວ່າ ເຫຼົ່ານີ້ທໍາທີ່ຄວນຮູ້ຍິ່ງ ຯລຯ ເຫຼົ່ານີ້ທໍາທີ່ຄວນກໍານົດຮູ້ ຯລຯ ເຫຼົ່ານີ້ທໍາທີ່ຄວນລະ ຯລຯ ເຫຼົ່ານີ້ທໍາທີ່ຄວນຈະເລີນ ຯລຯ ເຫຼົ່ານີ້ທໍາທີ່ຄວນເຮັດໃຫ້ແຈ້ງ ຯລຯ

ຕັດສະຣູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະ ການສະລັດຖິ້ມຜັດສາຍະຕະນະ ໖ ຕັດສະຣູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດຖິ້ມອຸປາທານຂັນ ໕ ຕັດສະຣູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະ ການສະລັດຖິ້ມມະຫາພູຕະຣູບ ໔

ຕັດສະຣູ້ວ່າ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ອີກໄນໜຶ່ງ ທຳມະຊາດແນວໃດກໍຕາມທີ່ຄວນຕັດສະຣູ້ ຄວນຕັດສະຣູ້ຕາມລຳດັບ ຄວນຕັດສະຣູ້ສະເພາະ ຄວນຕັດສະຣູ້ດ້ວຍດີ ຄວນບັນລຸ ຄວນຖືກຕ້ອງ ຄວນເຮັດໃຫ້ແຈ້ງ ພຣະຜູ້ມີພຣະພາກເຈົ້າກໍຕັດສະຣູ້ ຕັດສະຣູ້ຕາມລຳດັບ ຕັດສະຣູ້ສະເພາະ ຕັດສະຣູ້ດ້ວຍດີ ຕັດສະຣູ້ໂດຍຊອບ ຊົງບັນລຸ ຊົງຖືກຕ້ອງ ຊົງກະທຳໃຫ້ແຈ້ງທຳມະຊາດນັ້ນທັງໝົດ ດ້ວຍໂພທິຍານນັ້ນ ພຣະຜູ້ມີພຣະພາກເຈົ້າ ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານ ລຳພັງພຣະອົງດຽວ ຈຶ່ງຊື່ວ່າ ຊົງເປັນເອກບຸຣຸດ ເປັນແນວນີ້

ຄຳວ່າ ຄວາມຍິນດີ ໃນຄຳວ່າ ບັນລຸຄວາມຍິນດີແລ້ວ ໄດ້ແກ່ ບັນລຸ ຄື ບັນລຸພ້ອມ ເຖິງຖືກຕ້ອງ ເຮັດໃຫ້ແຈ້ງຄວາມຍິນດີໃນເນກຂຳມະ ຄວາມຍິນດີໃນວິເວກ ຄວາມຍິນດີໃນ ອຸປະສະມະ (ສະພາວະອັນເປັນທີ່ສະງົບ ຄື ນິບພານ) ຄວາມຍິນດີໃນສຳໂພທິຍານແລ້ວ ລວມຄວາມວ່າ ຊົງເປັນເອກບຸຣຸດ ບັນລຸຄວາມຍິນດີແລ້ວ ດ້ວຍເຫດນັ້ນ ພຣະສາຣີບຸດເຖຣະຈຶ່ງກ່າວວ່າ

ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ
ຍ່ອມຊົງຜາກົດແກ່ຊາວໂລກ ພ້ອມທັງເທວະໂລກ
ຊົງກຳຈັດຄວາມມືດທັງປວງ
ຊົງເປັນເອກບຸຣຸດ ບັນລຸຄວາມຍິນດີແລ້ວ

[໑໗໔] (ພຣະສາຣີບຸດເຖຣະກ່າວວ່າ)

ຂ້າພຣະອົງມີຄວາມຕ້ອງການ (ຖາມ) ບັນຫາ
ຈຶ່ງມາເຝົ້າພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ບໍ່ຊົງຖືກກິເລດອາໄສ ເປັນຜູ້ໝັ້ນຄົງ ບໍ່ຫຼອກລວງ
ສະເດັດມາເປັນພຣະຄະນາຈານຂອງຄົນເປັນຈຳນວນຫຼາຍ
ຜູ້ຍັງຜູກພັນຢູ່ໃນສາດສະໜານີ້

## ວ່າດ້ວຍພະນາມຂອງພຣະພຸດທະເຈົ້າ

ຄຳວ່າ ພຣະພຸດທະເຈົ້າພຣະອົງນັ້ນ ຜູ້ບໍ່ຊົງຖືກກິເລດອາໄສ ເປັນຜູ້ໝັ້ນຄົງ ອະທິບາຍວ່າ

ຄຳວ່າ ພຣະພຸດທະເຈົ້າ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນພຣະສັບພັນຍູ ບໍ່ມີຄູອາຈານ ໄດ້ຕັດສະຣູ້ສັດຈະໃນທຳທີ່ບໍ່ເຄີຍສະດັບມາກ່ອນ ດ້ວຍພຣະອົງເອງ ຊົງບັນລຸຄວາມເປັນພຣະສັບພັນຍູໃນສັດຈະນັ້ນ ແລະ ຄວາມເປັນຜູ້ຊົງຊຳນານໃນພະລະຍານທັງຫຼາຍ

ຄຳວ່າ ພຣະພຸດທະເຈົ້າ ອະທິບາຍວ່າ ຊື່ວ່າພຣະພຸດທະເຈົ້າ ຍ້ອນມີຄວາມໝາຍວ່າແນວໃດ?

ຊື່ວ່າພຣະພຸດທະເຈົ້າ ຍ້ອນຕັດສະຣູ້ສັດຈະທັງຫຼາຍແລ້ວ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເຮັດໝູ່ສັດໃຫ້ຕັດສະຣູ້
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນພຣະສັບພັນຍູ
ຊື່ວ່າພຣະພຸດທະເຈົ້າ ຍ້ອນເປັນຜູ້ຊົງເຫັນທຳທັງປວງ
ຊື່ວ່າພຣະພຸດທະເຈົ້າ ຍ້ອນບໍ່ມີຄົນອື່ນແນະນຳ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ເບີກບານ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນພຣະຂີນາສົບ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ປາສະຈາກອຸປະກິເລດ
ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກຣາຄະໂດຍໝົດສິ້ນ
ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກໂທສະໂດຍໝົດສິ້ນ
ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກໂມຫະໂດຍໝົດສິ້ນ
ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກກິເລດໂດຍໝົດສິ້ນ
ຊື່ວ່າພຣະພຸດທະເຈົ້າ ຍ້ອນສະເດັດເຖິງທາງສາຍເອກ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຕັດສະຣູ້ ອະນຸດຕະຣະສຳມາສຳໂພທິຍານ ໄດ້ໂດຍພຣະອົງເອງ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ຂະຈັດຄວາມບໍ່ຣູ້ໄດ້ແລ້ວ ຍ້ອນຊົງເປັນຜູ້ໄດ້ສະເພາະຄວາມຣູ້

ຄຳວ່າ ພຣະພຸດທະເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງ ບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດ ແລະ ອຳມາດຕັ້ງ ບໍ່ແມ່ນພຣະຍາດ ແລະ ຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນວິໂມກຂັນຕິກະນາມ ເປັນສັດສິກາບັນຍັດຂອງພຣະ ຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ເກີດຂຶ້ນພ້ອມກັບການຊົງໄດ້ສະເພາະພຣະສັບພັນຍຸຕະຍານທີ່ເຫງົ້າຕົ້ນໂພ ລວມຄວາມວ່າ ພຣະພຸດທະເຈົ້າພຣະອົງນັ້ນ

ຄຳວ່າ ຜູ້ບໍ່ຊົງຖືກກິເລດອາໄສ ໄດ້ແກ່ ຄວາມອາໄສ ໒ ຢ່າງ ຄື (໑) ຄວາມອາໄສດ້ວຍອຳນາດຕັນຫາ (໒) ຄວາມອາໄສດ້ວຍອຳນາດທິດຖິ

# ວ່າດ້ວຍຕັນຫາທິດຖິ

ຄວາມອາໄສດ້ວຍອຳນາດຕັນຫາ ເປັນແນວໃດ?

ຄື ວັດຖຸທີ່ເຮັດໃຫ້ເປັນເຂດ ເປັນແດນ ເປັນສ່ວນ ເປັນພະແໜກ ກຳນົດຖືເອົາ ຍຶດຖືວ່າເປັນຂອງເຮົາ ດ້ວຍສ່ວນແຫ່ງຕັນຫາມີປະມານເທົ່າໃດ ຍ່ອມຍຶດຖືວ່າເປັນຂອງເຮົາເຊິ່ງ ວັດຖຸປະມານເທົ່ານີ້ວ່າ ນີ້ຂອງເຮົາ ນັ້ນຂອງເຮົາ ເທົ່ານີ້ຂອງເຮົາ ຂອງເຮົາມີປະລິມານເທົ່ານີ້ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຍິງຊາຍ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ທີ່ນາ ທີ່ສວນ ເງິນ ຄຳ ບ້ານ ນິຄົມ ຣາດຊະທານີ ແຄວ້ນ ຊົນນະບົດ ກອງພົນ ຮົບ ຄັງຫຼວງ ແມ່ນມະຫາປະຖະພີທັງໝົດຍ່ອມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດ ຕັນຫາ ເຊິ່ງຈຳແນກໄດ້ ໑໐໘ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດຕັນຫາ

ຄວາມອາໄສດ້ວຍອຳນາດທິດຖິ ເປັນແນວໃດ?

ຄື ສັກກາຍະທິກຖິມີວັດຖຸ ໒໐ ມິດສາທິດຖິມີວັດຖຸ ໑໐ ອັນຕະຄາຫິກະທິດຖິມີວັດຖຸ ໑໐ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບ ຄື ທິດຖິ ຄວາມກັນດານ ຄື ທິດຖິ ສັ່ງນໜາມ ຄື ທິດຖິ ຄວາມດີ້ນຣົນ ຄື ທິດຖິ ເຄື່ອງຜູກພັນ ຄື ທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຍຶດໝັ້ນ ຄວາມຍຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖືຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິປະລາດ ຄວາມຖືຜິດ ຄວາມຖືໃນສິ່ງທີ່ບໍ່ເປັນຄວາມຈິງວ່າ ເປັນຈິງເຫັນປານນີ້ຈົນເຖິງທິດຖິ ໖໒ ນີ້ຊື່ວ່າຄວາມອາໄສດ້ວຍອຳນາດທິດຖິ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະຄວາມອາໄສດ້ວຍອຳນາດຕັນຫາໄດ້ແລ້ວ ສະລັດຖິ້ມຄວາມອາໄສດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ຊົງລະຄວາມອາໄສດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມອາໄສດ້ວຍອຳນາດທິດຖິໄດ້ແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊື່ວ່າບໍ່ຊົງອາໄສ ຄື ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ບໍ່ຕິດໃຈແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວກັບຕາ ฯລฯ ຫູ ฯລฯ ດັງ ฯລฯ ລີ້ນ ฯລฯ ກາຍ ฯລฯ ໃຈ ฯລฯ ຮູບ ฯລฯ ສຽງ ฯລฯ ກິ່ນ ฯລฯ ຣົດ ฯລฯ ໂຜດຖັບພະ ฯລฯ ຕະກູນ ฯລฯ ໝູ່ຄະນະ ฯລฯ ອາວາດ ฯລฯ ລາບ ฯລฯ ຍົດ ฯລฯ ສັນເສີນ ฯລฯ ສຸກ ฯລฯ ຈີວອນ ฯລฯ ບິນທະບາດ ฯລฯ ເສນາສະນະ ฯລฯ ຄິລານະປັດໃຈເພສັດບໍຣິຂານ ฯລฯ ກາມທາດ ฯລฯ ຮູບທາດ ฯລฯ ອະຮູບທາດ ฯລฯ ກາມະພົບ ฯລฯ ຮູບພົບ ฯລฯ ອະຮູບພົບ ฯລฯ ສັນຍາພົບ ฯລฯ ອະສັນຍາພົບ ฯລฯ ເນວະສັນຍານາສັນຍາພົບ ฯລฯ ເອກະໂວກາຣະພົບ ฯລฯ ຈະຕຸໂວກາຣະພົບ ฯລฯ ປັນຈະໂວກາຣະພົບ ฯລฯ ອະດີດ ฯລฯ ອະນາຄົດ ฯລฯ ປັດຈຸບັນ ฯລฯ ຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ມີໃຈເປັນອິດສະຫຼະ (ຈາກຄວາມອາໄສ) ຢູ່ ລວມຄວາມວ່າ ພຣະພຸດທະເຈົ້າພຣະອົງນັ້ນຜູ້ບໍ່ຊົງຖືກ ກິເລດອາໄສ

# ວ່າດ້ວຍຜູ້ໝັ້ນຄົງດ້ວຍອາການ ໕ ຢ່າງ

ຄຳວ່າ ເປັນຜູ້ໝັ້ນຄົງ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຜູ້ໝັ້ນຄົງດ້ວຍອາການ ໕ ຢ່າງ ຄື

໑. ເປັນຜູ້ໝັ້ນຄົງ ຮູ້ໃນອິດຖາຣົມແລະອະນິດຖາຣົມ
໒. ເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ສະລະແລ້ວ
໓. ເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ຂ້າມໄດ້ແລ້ວ
໔. ເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ພົ້ນແລ້ວ
໕. ເປັນຜູ້ໝັ້ນຄົງ ຍ້ອນຊົງສະແດງອອກເຊິ່ງທຳນັ້ນ ໆ

ພຣະຜູ້ມີພຣະພາກເຈົ້າເປັນຜູ້ໝັ້ນຄົງໃນອິດຖາຣົມ ແລະ ອະນິດຖາຣົມ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າເປັນຜູ້ໝັ້ນຄົງທັງໃນລາບ ແລະ ຄວາມເສື່ອມລາບ ເປັນຜູ້ໝັ້ນຄົງ ທັງໃນຍົດ ແລະ ຄວາມເສື່ອມຍົດ ເປັນຜູ້ໝັ້ນຄົງທັງໃນສັນເສີນ ແລະ ນິນທາ ເປັນຜູ້ໝັ້ນຄົງທັງໃນສຸກ ແລະ ທຸກ ຄົນບາງພວກເອົາຂອງຫອມຊະໂລມພຣະພາຫາຂ້າງໜຶ່ງ ອີກພວກໜຶ່ງໃຊ້ມີດຖາກພຣະພາຫາອີກຂ້າງໜຶ່ງ ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງມີຄວາມຍິນດີໃນການຊະໂລມດ້ວຍຂອງຫອມທີ່ພຣະພາຫາຂ້າງນັ້ນ ແລະ ບໍ່ຊົງມີຄວາມຍິນຮ້າຍໃນການຖາກພຣະພາຫາຂ້າງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງລະຄວາມຍິນດີ ແລະ ຄວາມຍິນຮ້າຍໄດ້ແລ້ວ ຊົງລ່ວງພົ້ນຄວາມດີໃຈ ແລະ ຄວາມເສຍໃຈແລ້ວ ຊົງກ້າວລ່ວງຄວາມຍິນດີ ແລະ ຄວາມຍິນຮ້າຍໄດ້ແລ້ວ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າເປັນຜູ້ໝັ້ນຄົງໃນອິດຖາຣົມ ແລະ ອະນິດຖາຣົມ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ສະລະແລ້ວ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງສະລະ ຄາຍ ປ່ອຍ ລະ ສະລັດຖິ້ມຣາຄະໄດ້ແລ້ວ ฯລฯ ໂທສະ ฯລฯ ໂມຫະ ฯລฯ ໂກທະ ฯລฯ ອຸປະນາຫະ ฯລฯ ມັກຂະ .. ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖຳພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯ ຄວາມຮ້ອນຮົນທຸກສະຖານ ฯລฯ ຄວາມເດືອດຮ້ອນທຸກປະການ ฯລฯ ພຣະຜູ້ມີພຣະພາກເຈົ້າຊົງສະລະ ຄາຍ ປ່ອຍ ລະ ສະລັດຖິ້ມ ອະກຸສະລາພິສັງຂານທຸກປະເພດໄດ້ແລ້ວ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ສະລະແລ້ວ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ຂ້າມໄດ້ແລ້ວ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າ ຊົງຂ້າມ ຄື ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ທາງແຫ່ງສົງສານທັງປວງໄດ້ແລ້ວ ພຣະຜູ້

ມີພຣະພາກເຈົ້າພຣະອົງນັ້ນ ຊົງຢູ່ໃນ (ອະຣິຍະວາສະທໍາ) ແລ້ວ ຊົງປະພຶດຈະຣະນະທໍາແລ້ວ ຊົງຜ່ານທາງໄກແລ້ວ ຊົງເຖິງທິດ (ນິບພານ) ແລ້ວ ຊົງເຖິງຈຸດຈົບ (ນິບພານ) ແລ້ວ ຊົງຮັກສາພົມມະຈັນແລ້ວ ຊົງບັນລຸທິດຖີສູງສຸດແລ້ວ ຊົງຈະເລີນມັກແລ້ວ ຊົງລະກິເລດໄດ້ແລ້ວ ຊົງຮູ້ແຈ້ງທໍາທີ່ບໍ່ກໍາເຣີບແລ້ວ ຊົງເຮັດນິໂຣດໃຫ້ແຈ້ງແລ້ວ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງກໍານົດຮູ້ທຸກແລ້ວ ຊົງລະສະມຸໄທໄດ້ແລ້ວ ຊົງຈະເລີນມັກໄດ້ແລ້ວ ຊົງເຮັດນິໂຣດໃຫ້ແຈ້ງໄດ້ແລ້ວ ຊົງຮູ້ຍິ່ງທໍາທີ່ຄວນຮູ້ຍິ່ງແລ້ວ ຊົງກໍານົດຮູ້ທໍາທີ່ຄວນກໍານົດຮູ້ໄດ້ແລ້ວ ຊົງລະທໍາທີ່ຄວນລະໄດ້ແລ້ວ ຊົງຈະເລີນທໍາທີ່ຄວນຈະເລີນໄດ້ແລ້ວ ຊົງເຮັດໃຫ້ແຈ້ງທໍາທີ່ຄວນເຮັດໃຫ້ແຈ້ງໄດ້ແລ້ວ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຖອນຫຼັກສະລັກ ຄື ອະວິດຊາໄດ້ແລ້ວ ຊົງຖົມຄູ ຄື ກໍາໄດ້ແລ້ວ ຊົງຖອນເສົາຣະນຽດ ຄື ຕັນຫາໄດ້ແລ້ວ ບໍ່ມີບານປະຕູ ຄື ສັງໂຍດ ຊົງ ໄກຈາກຂ້າເສິກ ຄື ກິເລດ ຊົງປິດທຸງ ຄື ມານະລົງສາແລ້ວ ຊົງປົງພາຣະໄດ້ແລ້ວ ບໍ່ໄດ້ຊົງກ່ຽວຂ້ອງກັບໂຍຄະກິເລດແລ້ວ ຊົງລະອົງ ໕ (ນິວອນ) ໄດ້ແລ້ວ ຊົງປະກອບດ້ວຍອົງ ໖ ຊົງມີທໍາເຄື່ອງຮັກສາຢ່າງເອກ (ຄືສະຕິ) ມີອະປັດເສນະທໍາ ໔ ຢ່າງ ມີປັດເຈກະສັດຈະ ອັນບັນເທົາໄດ້ແລ້ວ ຊົງມີການສະແຫວງຫາອັນສະລະໄດ້ໂດຍຊອບບໍ່ບົກຜ່ອງ ຊົງມີພຣະດໍາຣິບໍ່ຂຸ່ນມົວ ຊົງມີກາຍສັງຂານອັນຣະງັບໄດ້ແລ້ວ ຊົງມີຈິດຫຼຸດພົ້ນດີແລ້ວ ຊົງມີປັນຍາຫຼຸດພົ້ນໄດ້ດີ ຊົງເປັນຜູ້ບໍລິສຸດບໍລິບູນ ຊົງຢູ່ຈົບພົມມະຈັນ ຊົງເປັນອຸດົມບຸຣຸດ ຊົງເປັນບໍຣົມບຸຣຸດ ຊົງເຖິງການບັນລຸປະຣະມັດຖະທໍາແລ້ວ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ບໍ່ໄດ້ຊົງກໍ່ເຜີນກໍາ ບໍ່ໄດ້ຊົງກໍາຈັດ ຊົງກໍາຈັດໄດ້ແລ້ວດໍາຣົງຢູ່ ບໍ່ໄດ້ຊົງລະກິເລດ ບໍ່ໄດ້ຊົງຖືໝັ້ນ ຊົງລະໄດ້ແລ້ວດໍາຣົງຢູ່ ບໍ່ໄດ້ຊົງຫຍິບ ບໍ່ໄດ້ຊົງຍົກຊົງຫຍິບໄດ້ແລ້ວດໍາຣົງຢູ່ ບໍ່ໄດ້ຊົງດັບ ບໍ່ໄດ້ຊົງກໍ່ ຊົງດັບໄດ້ແລ້ວດໍາຣົງຢູ່ ຊື່ວ່າດໍາຣົງຕົນຢູ່ໄດ້ຍ້ອນຊົງພຽບພ້ອມດ້ວຍສີນຂັນ ສະມາທິຂັນ ປັນຍາຂັນ ວິມຸດຕິຂັນ ວິມຸດຕິຍານະທັດສະນະຂັນອັນເປັນອະເສຂະ ຊົງດໍາຣົງຢູ່ ຊົງແທງຕະຫຼອດສັດຈະ ແລ້ວ ຊົງດໍາຣົງຢູ່ໂດຍການກ້າວລ່ວງຕັນຫາອັນເປັນເຫດໃຫ້ຫວັ່ນໄຫວ ຊົງດໍາຣົງຢູ່ໂດຍການດັບໄຟກິເລດ ຊົງດໍາຣົງຢູ່ໂດຍບໍ່ຕ້ອງວຽນວ່າຍຕາຍເກີດ ຊົງດໍາຣົງຢູ່ໂດຍການສະມາທານທໍາຂັ້ນສຸດຍອດ ຊົງດໍາຣົງຢູ່ໂດຍການເສບວິມຸດຕິ ຊົງດໍາຣົງຢູ່ດ້ວຍເມດຕາອັນບໍລິສຸດ ກະລຸນາອັນບໍລິສຸດ ມຸທິຕາອັນບໍລິສຸດ ອຸເປກຂາອັນບໍລິສຸດ ຊົງດໍາຣົງຢູ່ດ້ວຍຄວາມບໍລິສຸດຢ່າງຍິ່ງ ຊົງດໍາຣົງຢູ່ດ້ວຍຄວາມບໍລິສຸດຍ້ອນບໍ່ມີຕັນຫາທິດຖິ ມານະ ຊົງດໍາຣົງຢູ່ໂດຍຄວາມເປັນຜູ້ຫຼຸດພົ້ນ ຊົງດໍາຣົງຢູ່ໂດຍຄວາມເປັນຜູ້ສັນໂດດ ຊົງດໍາຣົງຢູ່ໃນຂັນສຸດທ້າຍ ຊົງດໍາຣົງຢູ່ໃນທາດສຸດທ້າຍ ຊົງດໍາຣົງຢູ່ໃນອາຍະຕະນະສຸດທ້າຍ ຊົງດໍາຣົງຢູ່ໃນຄະຕິສຸດທ້າຍ ຊົງດໍາຣົງຢູ່ໃນອຸປະບັດສຸດທ້າຍ ຊົງດໍາຣົງຢູ່ໃນປະຕິສົນທິສຸດທ້າຍ ຊົງດໍາຣົງຢູ່ໃນພົບສຸດທ້າຍ ຊົງດໍາຣົງຢູ່ໃນສົງສານສຸດທ້າຍ ຊົງດໍາຣົງຢູ່ໃນວັດຕະສຸດທ້າຍ ຊົງດໍາ

ຮົງຢູ່ໃນພົບສຸດທ້າຍ ຊົງດຳຮົງຢູ່ໃນປະຊຸມແຫ່ງຂັນສຸດທ້າຍ ຊົງໄວ້ເຊິ່ງຮ່າງກາຍຂັ້ນສຸດທ້າຍ ຊົງເປັນຜູ້ໄກຈາກຂ້າເສິກ (ສົມຈິງດັ່ງຄາຖາປະພັນວ່າ)

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊົງມີພົບນີ້ເປັນພົບສຸດທ້າຍ
ຊົງມີປະຊຸມແຫ່ງຂັນນີ້ເປັນຄັ້ງສຸດທ້າຍ
ບໍ່ມີການວຽນເກີດ ວຽນຕາຍ ແລະ ພົບໃໝ່ກໍບໍ່ມີອີກ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ຂ້າມໄດ້ແລ້ວ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ພົ້ນແລ້ວ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງມີພຣະຫະໄທພົ້ນ ຫຼຸດພົ້ນ ຫຼຸດພົ້ນດີແລ້ວຈາກຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຊົງມີພຣະຫະໄທພົ້ນ ຫຼຸດພົ້ນ ຫຼຸດພົ້ນດີແລ້ວຈາກອະກຸສະລາພິສັງຂານທຸກປະເພດ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າເປັນຜູ້ໝັ້ນຄົງ ຍ້ອນເປັນຜູ້ພົ້ນແລ້ວ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າເປັນຜູ້ໝັ້ນຄົງ ຍ້ອນຊົງສະແດງອອກເຊິ່ງທຳນັ້ນ ໆ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າ ເມື່ອສີນມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີສີນ

ເມື່ອສັດທາມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີສັດທາ
ເມື່ອຄວາມພຽນມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີຄວາມພຽນ
ເມື່ອສະຕິມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີສະຕິ
ເມື່ອສະມາທິມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີສະມາທິ
ເມື່ອປັນຍາມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີປັນຍາ
ເມື່ອວິດຊາມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີວິດຊາ ໓
ເມື່ອພະລະມີຢູ່ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນຊົງສະແດງອອກວ່າ ຊົງເປັນຜູ້ມີພະລະ ໑໐

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າເປັນຜູ້ໝັ້ນຄົງຍ້ອນສະແດງອອກເຊິ່ງທຳນັ້ນ ໆ ເປັນແນວນີ້ ລວມຄວາມວ່າ ພຣະພຸດທະເຈົ້າພຣະອົງນັ້ນ ຜູ້ບໍ່ຊົງຖືກກິເລດອາໄສ ເປັນຜູ້ໝັ້ນຄົງ

## ວ່າດ້ວຍເລື້ອງຫຼອກລວງ ໓ ຢ່າງ

ຄຳວ່າ ບໍ່ຫຼອກລວງ ໃນຄຳວ່າ ບໍ່ຫຼອກລວງ ສະເດັດມາເປັນພຣະຄະນາຈານ ໄດ້ແກ່ເລື້ອງຫຼອກລວງ ໓ ຢ່າງ ຄື

໑. ເລື້ອງຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ
໒. ເລື້ອງຫຼອກລວງກ່ຽວກັບອິລິຍາບົດ
໓. ເລື້ອງຫຼອກລວງກ່ຽວກັບການເວົ້າລຽບຄຽງ

ເລື້ອງຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ ເປັນແນວໃດ?

ຄື ຄະຫະບໍດີໃນໂລກນີ້ ຍ່ອມນິມົນພິກຂຸ ຖວາຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ພິກຂຸນັ້ນ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ມີຄວາມຕ້ອງການຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຍ້ອນຕ້ອງການໄດ້ຫຼາຍຍິ່ງຂຶ້ນ ຈຶ່ງບອກຄືນຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ທ່ານເວົ້າແນວນີ້ວ່າ ຈີວອນທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນທ່ຽວເລືອກເກັບຜ້າເກົ່າຈາກປ່າຊ້າ ກອງມູນຝອຍ ຫຼື ຮ້ານຕະຫຼາດເອົາມາເຮັດສັງຄາຕິໃຊ້ ຈຶ່ງຈະເປັນການເໝາະສົມ ບິນທະບາດທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນສຳເລັດຄວາມເປັນຢູ່ດ້ວຍກ້ອນເຂົ້າທີ່ໄດ້ມາດ້ວຍລຳແຂ່ງ ໂດຍການທ່ຽວສະແຫວງຫາ ຈຶ່ງຈະເປັນການເໝາະສົມ ເສນາສະນະທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນຢູ່ເຫງົ້າໄມ້ ຢູ່ທີ່ປ່າຊ້າ ຫຼື ຢູ່ທີ່ກາງແຈ້ງ ຈຶ່ງຈະເປັນການເໝາະສົມ ຄິລານະປັດໄຈເພສັດບໍຣິຂານທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນເຮັດຢາດ້ວຍນ້ຳມູດເນົ່າ ຫຼື ຕ່ອນໝາກສົ້ມມໍ ຈຶ່ງຈະເປັນການ ເໝາະສົມ

ຍ້ອນຕ້ອງການໄດ້ໃຫ້ຫຼາຍຍິ່ງຂຶ້ນນັ້ນ ທ່ານຈຶ່ງຄອງຈີວອນເສົ້າໝອງ ສັນບິນທະບາດເສົ້າໝອງ ໃຊ້ສອຍເສນາສະນະຊອມຊໍ່ ໃຊ້ຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ຄະຫະບໍດີ ທັງຫຼາຍຮູ້ຈັກພິກຂຸນັ້ນແນວນີ້ວ່າ ສະມະນະທ່ານນີ້ ມີຄວາມປາຖະໜານ້ອຍ ສັນໂດດ ສະງົບສະຫງັດ ບໍ່ຄຸກຄີດ້ວຍໝູ່ຄະນະ ຜາຣົບຄວາມພຽນ ມີວາທະກຳຈັດຂັດເກົາ ກໍຍິ່ງນິມົນທ່ານໃຫ້ຮັບຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານຫຼາຍຍິ່ງຂຶ້ນ ທ່ານກໍເວົ້າແນວນີ້ວ່າ ຍ້ອນພຽບພ້ອມດ້ວຍເຫດ ໓ ປະການ ກຸນລະບຸດຜູ້ມີສັດທາຍ່ອມປະສົບບຸນຫຼາຍ ຄື ຍ້ອນພຽບພ້ອມດ້ວຍສັດທາ ໗ລ໗ ຍ້ອນພຽບພ້ອມດ້ວຍໄທຍະທຳ ໗ລ໗ ຍ້ອນພຽບພ້ອມ ດ້ວຍພຣະທັກຂິໄນຍະບຸກຄົນ ກຸນລະບຸດຜູ້ມີສັດທາຍ່ອມປະສົບບຸນຫຼາຍ ທ່ານທັງຫຼາຍມີສັດທານີ້ຢູ່ ໄທຍະທຳນີ້ກໍມີຢູ່ພ້ອມ ທັງອາດຕະມາພາບກໍເປັນປະຕິຄາຫົກ ຖ້າອາດຕະມາພາບບໍ່ຮັບ ພວກທ່ານກໍຈັກເສື່ອມຈາກບຸນໄປສາ ອາດຕະມາພາບບໍ່ໄດ້ມີຄວາມຕ້ອງການດ້ວຍປັດໄຈນີ້ແຕ່ຈັກຮັບເພື່ອອະນຸເຄາະພວກທ່ານ ຍ້ອນອາໄສເຫດນັ້ນ ທ່ານຈຶ່ງຮັບຈີວອນຫຼາຍ ຮັບບິນທະ

ບາດຫຼາຍ ຮັບເສນາສະນະຫຼາຍ ຮັບຄິລານະປັດໄຈເພສັດບໍຣິຂານຫຼາຍ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງ ເຫັນປານນີ້ ນີ້ຕັດຮຽກວ່າ ເລື້ອງຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ

ເລື້ອງຫຼອກລວງກ່ຽວກັບອິລິຍາບົດ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ປາຖະໜາຈະໃຫ້ເຂົາຍ້ອງຍໍ ຄິດວ່າ ຄົນຈັກຍ້ອງຍໍເຮົາດ້ວຍອຸບາຍແນວນີ້ ຈຶ່ງສັງລວມການຍ່າງ ສັງລວມການຍືນ ສັງລວມການນັ່ງ ສັງລວມການນອນ ຕັ້ງສະຕິຍ່າງ ຕັ້ງສະຕິຍືນ ຕັ້ງສະຕິນັ່ງ ຕັ້ງສະຕິນອນ ເຮັດທຳທ່າເໝືອນພິກຂຸມີສະມາທິຍ່າງ ເໝືອນພິກຂຸມີສະມາທິຍືນ ເໝືອນພິກຂຸມີສະມາທິນັ່ງ ເໝືອນພິກຂຸມີສະມາທິນອນ ເປັນເໝືອນພິກຂຸຈະເລີນຊານອວດຕໍ່ໜ້າ ການຕັ້ງທ່າ ການວາງທ່າ ການດຳຣົງໝັ້ນອິລິຍາບົດ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງ ເຫັນປານນີ້ ນີ້ຕັດຮຽກວ່າ ເລື້ອງຫຼອກລວງກ່ຽວກັບອິລິຍາບົດ

ເລື້ອງຫຼອກລວງກ່ຽວກັບການເວົ້າລຽບຄຽງ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ປາຖະໜາຈະໃຫ້ເຂົາຍ້ອງຍໍ ຄິດວ່າ ຄົນຈັກຍ້ອງຍໍເຮົາດ້ວຍອຸບາຍແນວນີ້ ຈຶ່ງກ່າວວາຈາອິງອະຣິຍະທຳ ຄືເວົ້າວ່າ ພິກຂຸຜູ້ຊົງຈີວອນມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ຜູ້ໃຊ້ບາດ ຯລຯ ໃຊ້ພາຊະນະໂລຫະ ຯລຯ ໃຊ້ທຳມະກົກ ຯລຯ ໃຊ້ຜ້າກອງນ້ຳ ຯລຯ ໃຊ້ລູກກະແຈ ຯລຯ ໃຊ້ເກີບ ຯລຯ ໃຊ້ປະຄົດແອວ ຯລຯ ໃຊ້ສາຍໂຍກບາດ ມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ເວົ້າວ່າ ພິກຂຸຜູ້ມີອຸປັດຊາຣະດັບນີ້ ເປັນສະມະນະມີສັກໃຫຍ່ ມີອາຈານຣະດັບນີ້ ຯລຯ ມີຜູ້ຮ່ວມອຸປັດຊາຣະດັບນີ້ ຯລຯ ມີຜູ້ຮ່ວມອາຈານຣະດັບນີ້ ຯລຯ ມີມິດ ຯລຯ ມີພັກພວກ ຯລຯ ມີຄົນທີ່ຄົບຫາກັນ ຯລຯ ມີສະຫາຍຣະດັບນີ້ ເປັນສະມະນະມີສັກໃຫຍ່ ເວົ້າວ່າ ພິກຂຸຜູ້ຢູ່ໃນວິຫານມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ຯລຯ ຢູ່ໃນເຮືອນມີຫຼັງຄາດ້ານດຽວມີຮູບແບບແນວນີ້ ຯລຯ ຢູ່ໃນຜາສາດ ຯລຯ ຢູ່ໃນເຮືອນໂລ້ນ ຯລຯ ຢູ່ໃນຖ້ຳ ຯລຯ ຢູ່ໃນບ່ອນຫຼົບຫຼີກ ຯລຯ ຢູ່ໃນກຸດ ຯລຯ ຢູ່ໃນເຮືອນຍອດ ຯລຯ ຢູ່ທີ່ປ້ອມ ຯລຯ ຢູ່ໃນໂຮງມົນ ຯລຯຢູ່ໃນເຮືອນພັກ ຯລຯ ຢູ່ໃນເຮືອນຮັບຮອງ ຯລຯ ຢູ່ໃນມົນດົບ ຯລຯ ຢູ່ທີ່ເຫງົ້າໄມ້ ມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່

ອີກໄນໜຶ່ງ ພິກຂຸເປັນຜູ້ວາງໜ້າເສີຍເມີຍ ເຮັດໜ້ານິ່ວຄິ້ວຂະໝວດ ເວົ້າຕົວະຫຼອກລວງປິ້ນປ້ອນ ຕະລົບຕະແລງ ເປັນຜູ້ໄດ້ຮັບຍ້ອງຍໍດ້ວຍການວາງໜ້າວ່າ ສະມະນະນີ້ໄດ້ວິຫາຣະສະມາບັດ ອັນມີຢູ່ເຫັນປານນີ້ ພິກຂຸນັ້ນ ຍ່ອມກ່າວຄຳເວົ້າເຊັ່ນນັ້ນ ອັນກ່ຽວເນື່ອງດ້ວຍໂລກຸດຕະຣະທຳ ແລະ ສູນຍະຕະນິບພານ ເຊິ່ງເລິກເຊິ່ງ ເຊື່ອງລັບ ລະອຽດອ່ອນ ປິດບັງ ການເຮັດໜ້າ

ນິວ ການເຮັດຄົ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງ ເຫັນປານນີ້ ນີ້ຕັດຮຽກວ່າ ເລື້ອງຫຼອກລວງກ່ຽວກັບການເວົ້າລຽບຄຽງ

ເລື້ອງຫຼອກລວງ ໕ ຢ່າງນີ້ ພຣະຜູ້ມີພຣະພາກພຸດທະເຈົ້າ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຍ້ອນແນວນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າຜູ້ບໍ່ຫຼອກລວງ ລວມຄວາມວ່າ ບໍ່ຫຼອກລວງ

## ວ່າດ້ວຍພຣະພຸດທະເຈົ້າຊົງເປັນພຣະຄະນາຈານ

ຄຳວ່າ ພຣະຄະນາຈານ ໃນຄຳວ່າ ສະເດັດມາເປັນພຣະຄະນາຈານ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງເປັນພຣະຄະນາຈານ

ຊົງເປັນອາຈານແຫ່ງໝູ່ຄະນະ ຈຶ່ງຊື່ວ່າພຣະຄະນາຈານ
ຊົງເປັນສາດສະດາແຫ່ງໝູ່ຄະນະ ຈຶ່ງຊື່ວ່າພຣະຄະນາຈານ
ຊົງບໍລິຫານໝູ່ຄະນະ ຈຶ່ງຊື່ວ່າພຣະຄະນາຈານ
ຊົງສັ່ງສອນໝູ່ຄະນະ ຈຶ່ງຊື່ວ່າພຣະຄະນາຈານ
ຊົງຕາມສອນໝູ່ຄະນະ ຈຶ່ງຊື່ວ່າພຣະຄະນາຈານ
ຊົງແກ່ກ້າສະເດັດເຂົ້າສູ່ໝູ່ຄະນະ ຈຶ່ງຊື່ວ່າພຣະຄະນາຈານ

ໝູ່ຄະນະຍ່ອມຕັ້ງໃຈຟັງ ເງີ່ຍໂສຕະລົງຟັງພຣະອົງ ຕັ້ງຈິດເພື່ອຄວາມຮູ້ ຈຶ່ງຊື່ວ່າ ພຣະຄະນາຈານ

ພຣະສາດສະດາຊົງເຮັດໝູ່ຄະນະໃຫ້ອອກຈາກອະກຸສົນແລ້ວໃຫ້ດຳຣົງຢູ່ໃນກຸສົນ ຈຶ່ງຊື່ວ່າພຣະຄະນາຈານ

ຊົງເປັນພຣະຄະນາຈານຂອງໝູ່ພິກຂຸ ຯລຯ ໝູ່ພິກຂຸນີ ຯລຯ ໝູ່ອຸປາສົກ ຯລຯ ໝູ່ອຸປາສິກາ ຯລຯ ໝູ່ພຣະຣາຊາ ຯລຯ ໝູ່ກະສັດ ຯລຯ ໝູ່ພາມ ຯລຯ ໝູ່ແພດ ຯລຯ ໝູ່ສູດ ຯລຯ ໝູ່ເທບ ຯລຯ ໝູ່ພົມ ຈຶ່ງຊື່ວ່າພຣະຄະນາຈານ ພຣະສາດສະດາຊົງເປັນຜູ້ນຳໝູ່ ເປັນພຣະຄະນາຈານ ເປັນອາຈານແຫ່ງໝູ່ຄະນະ

ຄຳວ່າ ສະເດັດມາແລ້ວ ໄດ້ແກ່ ຊົງເຂົ້າໄປ ຊົງເຂົ້າໄປເຖິງ ຊົງເຖິງພ້ອມເຊິ່ງສັງກັດສະນະຄອນແລ້ວ ລວມຄວາມວ່າ ບໍ່ຫຼອກລວງ ສະເດັດມາເປັນພຣະຄະນາຈານ

ຄຳວ່າ ຂອງຄົນເປັນຈຳນວນຫຼາຍ ໃນຄຳວ່າ ຂອງຄົນເປັນຈຳນວນຫຼາຍ ຜູ້ຍັງຜູກພັນຢູ່ໃນສາດສະໜານີ້ ໄດ້ແກ່ ຄົນເປັນຈຳນວນຫຼາຍ ຄື ທີ່ເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ມະນຸດ

ຄໍາວ່າ ຜູ້ຍັງຜູກພັນຢູ່ ໄດ້ແກ່ ຜູ້ຍັງຜູກພັນຢູ່ ຄື ມີຄວາມປະພຶດຜູກພັນ ເປັນຜູ້ບໍາຣຸງເປັນສິດ ລວມຄວາມວ່າ ຂອງຄົນເປັນຈໍານວນຫຼາຍ ຜູ້ຍັງຜູກພັນຢູ່ໃນສາດສະໜານີ້

ຄໍາວ່າ ຂ້າພຣະອົງມີຄວາມຕ້ອງການ (ຖາມ) ບັນຫາ ຈຶ່ງມາເຝົ້າ ອະທິບາຍວ່າ ຂ້າພຣະອົງມີຄວາມຕ້ອງການດ້ວຍບັນຫາຈຶ່ງມາເຝົ້າແລ້ວ ຄື ປາຖະໜາຈະທູນຖາມບັນຫາ ຈຶ່ງມາເຝົ້າແລ້ວ ມີຄວາມປາຖະໜາຈະຟັງບັນຫາ ຈຶ່ງມາເຝົ້າແລ້ວ ລວມຄວາມວ່າ ຂ້າພຣະອົງມີຄວາມຕ້ອງການ (ຖາມ) ບັນຫາ ຈຶ່ງມາເຝົ້າ ແນວນີ້ແດ່

ອີກໄນໜຶ່ງ ການມາເຝົ້າ ການກ້າວຍ່າງເຂົ້າເຝົ້າ ການເຂົ້າໄປເຝົ້າ ການເຂົ້າໄປນັ່ງໃກ້ເພິ່ງມີແກ່ຜູ້ຕ້ອງການດ້ວຍບັນຫາ ຄື ຜູ້ປາຖະໜາຈະຖາມບັນຫາ ຜູ້ປາຖະໜາຈະຟັງບັນຫາ ລວມຄວາມວ່າ ຂ້າພຣະອົງມີຄວາມຕ້ອງການ (ຖາມ) ບັນຫາ ຈຶ່ງມາເຝົ້າ ແນວນີ້ແດ່

ອີກໄນໜຶ່ງ ພຣະອົງຊົງມີອາຄົມ( ແຫຼ່ງຄວາມຮູ້) ແຫ່ງບັນຫາ ພຣະອົງຊົງມີຄວາມສາມາດທີ່ຈະຕັດບອກ ຄື ວິສັດຊະນາບັນຫາຂໍ້ທີ່ຂ້າພຣະອົງທູນຖາມ ບັນຫາຂໍ້ນີ້ ຈຶ່ງເປັນພາຣະຂອງພຣະອົງ ລວມຄວາມວ່າ ຂ້າພຣະອົງມີຄວາມຕ້ອງການ (ຖາມ) ບັນຫາ ຈຶ່ງມາເຝົ້າ ແນວນີ້ແດ່ ດ້ວຍເຫດນັ້ນ ພຣະສາຣີບຸດຈຶ່ງກ່າວວ່າ

ຂ້າພຣະອົງມີຄວາມຕ້ອງການ (ຖາມ) ບັນຫາ
ຈຶ່ງມາເຝົ້າພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ບໍ່ຊົງຖືກກິເລດອາໄສ ເປັນຜູ້ໝັ້ນຄົງ ບໍ່ຫຼອກລວງ
ສະເດັດມາເປັນພຣະຄະນາຈານຂອງຄົນເປັນຈໍານວນຫຼາຍ
ຜູ້ຍັງຜູກພັນຢູ່ໃນສາດສະໜານີ້

[໑໘໓] (ພຣະສາຣີບຸດກ່າວວ່າ)

ເມື່ອພິກຂຸເບື່ອໜ່າຍ ໃຊ້ສອຍບ່ອນນັ່ງອັນວ່າງເປົ່າ
ໃນຖ້ຳແຫ່ງພູເຂົາ ທີ່ເຫງົ້າຕົ້ນໄມ້ ຫຼື ທີ່ປ່າຊ້າ

ຄໍາວ່າ ເມື່ອພິກຂຸ ໃນຄໍາວ່າ ເມື່ອພິກຂຸເບື່ອໜ່າຍ ໄດ້ແກ່ ເມື່ອພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ພິກຂຸຜູ້ເປັນພຣະເສຂະ

ຄໍາວ່າ ເບື່ອໜ່າຍ ໄດ້ແກ່ ເບື່ອໜ່າຍ ຄື ອຶດອັດ ຣະອາ ຣັງກຽດດ້ວຍຊາດ ฯລฯ ຊະຣາ ฯລฯ ພະຍາທິ ฯລฯ ມໍຣະນະ ฯລฯ ໂສກະ ฯລฯ ປະຣິເທວະ ฯລฯ ທຸກ ฯລฯ ໂທມະນັດ ฯລฯ ອຸປາຍາດ ฯລฯ

ເບື່ອໜ່າຍ ອຶດອັດ ຣະອາ ຣັງກຽດດ້ວຍທຸກເນື່ອງຈາກການເກີດໃນນະຣົກ ฯລฯ ທຸກເນື່ອງຈາກການເກີດໃນກໍາເນີດເດຍຣັດສານ ฯລฯ ທຸກເນື່ອງຈາກການເກີດໃນເຜດວິໄສ ฯລฯ

ທຸກເນື່ອງຈາກການເກີດໃນໂລກມະນຸດ ໆລໆ ທຸກເນື່ອງຈາກການຖືກຳເນີດໃນທ້ອງ ໆລໆ ທຸກເນື່ອງຈາກການຢູ່ໃນທ້ອງ ໆລໆ ທຸກເນື່ອງຈາກການເກີດຈາກທ້ອງ ໆລໆ ທຸກທີ່ສືບເນື່ອງຈາກຜູ້ເກີດ ໆລໆ ທຸກຂອງຜູ້ເກີດທີ່ເນື່ອງມາຈາກຜູ້ອື່ນ ໆລໆ ທຸກທີ່ເກີດຈາກຄວາມພະຍາຍາມຂອງຕົນ ໆລໆ ທຸກທີ່ເກີດຈາກຄວາມພະຍາຍາມຂອງຄົນອື່ນ ໆລໆ ທຸກທີ່ເກີດຈາກທຸກຂະເວທະນາ ໆລໆ ທຸກທີ່ເກີດຈາກສັງຂານ ໆລໆ ທຸກທີ່ເກີດຈາກຄວາມຜັນປ່ຽນ ໆລໆ

ເບື່ອໜ່າຍດ້ວຍທຸກຍ້ອນໂຣກທາງຕາ ໆລໆ ທຸກຍ້ອນໂຣກທາງຫູ ໆລໆ ທຸກຍ້ອນໂຣກທາງດັງ ໆລໆ ທຸກຍ້ອນໂຣກທາງລີ້ນ ໆລໆ ທຸກຍ້ອນໂຣກທາງກາຍ ໆລໆ ທຸກຍ້ອນໂຣກຫົວ ໆລໆ ທຸກຍ້ອນໂຣກຫູ ໆລໆ ທຸກຍ້ອນໂຣກປາກ ໆລໆ ທຸກຍ້ອນໂຣກແຂ້ວ ໆລໆ ໂຣກໄອ ໆລໆ ໂຣກຫືດ ໆລໆ ໄຂ້ຫວັດ ໆລໆ ໄຂ້ພິດ ໆລໆ ໄຂ້ເຊື່ອງຊຶມ ໆລໆ ໂຣກທ້ອງ ໆລໆ ເປັນລົມສະຫຼົບ ໆລໆ ລົງແດງ ໆລໆ ຈຸກສຽດ ໆລໆ ອະຫິວາຕົກໂຣກ ໆລໆ ໂຣກຂີ້ທູດ ໆລໆ ຝີ ໆລໆ ກາກ ໆລໆ ມອງຄໍ່ ໆລໆ ລົມບ້າໝູ ໆລໆ ຫິດເປື່ອຍ ໆລໆ ຫິດດ້ານ ໆລໆ ຫິດ ໆລໆ ຫູດ ໆລໆ ໂຣກລະລອກ ໆລໆ ໂຣກະບິຊ່ານ ໆລໆ ໂຣກເບົາຫວານ ໆລໆ ໂຣກເຣີມ ໆລໆ ໂຣກພຸພອງ ໆລໆ ໂຣກຣິດສີດວງທະວານ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກບີ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກລົມ ໆລໆ ໄຂ້ສັນນິບາດ ໆລໆ

ເບື່ອໜ່າຍດ້ວຍຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ໆລໆ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ໆລໆ ຄວາມໜາວ ໆລໆ ຄວາມຮ້ອນ ໆລໆ ຄວາມຫິວ ໆລໆ ຄວາມກະຫາຍ ໆລໆ ປວດອຸດຈາຣະ ໆລໆ ປວດປັດສາວະ ໆລໆ ທຸກທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະ ສັດເລືອຄານ ໆລໆ

ເບື່ອໜ່າຍ ຄື ອຶດອັດ ຣະອາ ຣັງກຽດດ້ວຍທຸກຍ້ອນມານດາຕາຍ ໆລໆ ທຸກຍ້ອນບິດາຕາຍ ໆລໆ ທຸກຍ້ອນອ້າຍນ້ອງຊາຍຕາຍ ໆລໆ ທຸກຍ້ອນເອື້ອຍນ້ອງສາວຕາຍ ໆລໆ ທຸກຍ້ອນບຸດຕາຍ ໆລໆ ທຸກຍ້ອນທິດາຕາຍ ໆລໆ ທຸກຍ້ອນຄວາມພິນາດຂອງຍາດພີ່ນ້ອງ ໆລໆ ທຸກຍ້ອນໂພຄະຊັບພິນາດ ໆລໆ ທຸກຍ້ອນຄວາມເສຍຫາຍທີ່ເກີດຈາກໂຣກ ໆລໆ ທຸກຍ້ອນສີນວິບັດ ໆລໆ ທຸກຍ້ອນທິດຖິວິບັດ ລວມຄວາມວ່າ ເມື່ອພິກຂຸເບື່ອໜ່າຍ

ຄຳວ່າ ໃຊ້ສອຍບ່ອນນັ່ງອັນວ່າງເປົ່າ ອະທິບາຍວ່າ ທີ່ເປັນບ່ອນນັ່ງຂອງພິກຂຸ ຕັດຮຽກວ່າ ບ່ອນນັ່ງ ໄດ້ແກ່ ຕຽງ ຕັ່ງ ເບາະ ເສື່ອ ແຜ່ນໜັງ ເຄື່ອງປູລາດເຮັດດ້ວຍຫຍ້າ ເຄື່ອງປູລາດ ເຮັດດ້ວຍໃບໄມ້ ເຄື່ອງປູລາດເຮັດດ້ວຍເຟືອງ ບ່ອນນັ່ງນັ້ນ ວ່າງ ຄື ສະຫງັດ ງຽບຈາກການເຫັນຮູບບໍ່ເປັນທີ່ສະບາຍ ໆລໆ ຈາກການໄດ້ຍິນສຽງບໍ່ເປັນທີ່ສະບາຍ ໆລໆ ຈາກກາມມະຄຸນ ໕ ບໍ່ເປັນທີ່ສະບາຍ ເມື່ອພິກຂຸ ໃຊ້ ຄື ໃຊ້ສອຍ ເສບ ເສບເປັນນິດ ຊ່ອງເສບ ເສບສະເພາະບ່ອນນັ່ງອັນວ່າງເປົ່ານັ້ນ ລວມຄວາມວ່າ ໃຊ້ສອຍບ່ອນນັ່ງອັນວ່າງເປົ່າ

ຄຳວ່າ ທີ່ເຫງົ້າຕົ້ນໄມ້ ຫຼື ທີ່ປ່າຊ້າ ອະທິບາຍວ່າ ຣຸກຂະມູນນັ້ນເອງ ຊື່ວ່າເຫງົ້າຕົ້ນໄມ້ ປ່າຊ້ານັ້ນເອງ ຊື່ວ່າປ່າຊ້າ ລວມຄວາມວ່າ ທີ່ເຫງົ້າຕົ້ນໄມ້ ຫຼື ທີ່ປ່າຊ້າ

ຄຳວ່າ ໃນຖ້ຳແຫ່ງພູເຂົາ ອະທິບາຍວ່າ ບັນພົດນັ້ນເອງ ຮຽກວ່າພູເຂົາ ກັນທະຣະນັ້ນເອງ ຮຽກວ່າຮ່ອມພູ ຄິຣິຄຸຫານັ້ນເອງ ຮຽກວ່າຖ້ຳແຫ່ງພູເຂົາ ຊອກລະຫວ່າງເຂົາ ຮຽກວ່າ ຮ່ອມພູແຫ່ງພູເຂົາທັງຫຼາຍ ລວມຄວາມວ່າ ໃນຖ້ຳແຫ່ງພູເຂົາ ດ້ວຍເຫດນັ້ນ ພຣະສາຣີບຸດເຖຣະຈຶ່ງກ່າວວ່າ

ເມື່ອພິກຂຸເບື່ອໜ່າຍ ໃຊ້ສອຍບ່ອນນັ່ງອັນວ່າງເປົ່າ
ທີ່ເຫງົ້າຕົ້ນໄມ້ ທີ່ປ່າຊ້າ ຫຼື ໃນຖ້ຳແຫ່ງພູເຂົາ

[໑໘໔] (ພຣະສາຣີບຸດເຖຣະກ່າວວ່າ)

ພິກຂຸຢູ່ເທິງບ່ອນນອນບ່ອນນັ່ງອັນບໍ່ມີສຽງອື້ອຶງ
ເຫັນອາລົມທີ່ໜ້າຫວາດສຽວເຫຼົ່າໃດແລ້ວ ບໍ່ເພິ່ງຫວັ່ນໄຫວ
ພິກຂຸ (ອື່ນ) ເພິ່ງຫວັ່ນໄຫວຮ້ອງຢູ່ເທິງບ່ອນນອນສູງ ແລະ ໃຫຍ່
ເຊິ່ງເປັນບ່ອນມີອາລົມທີ່ໜ້າຫວາດສຽວ

ຄຳວ່າ ສູງ ແລະ ໃຫຍ່ ໃນຄຳວ່າ ເທິງບ່ອນນອນສູງ ແລະ ໃຫຍ່ ໄດ້ແກ່ ສູງ ແລະໃຫຍ່ ຄື ຊົ່ວ ແລະ ປະນີດ ດີ ແລະ ຊົ່ວ

ຄຳວ່າ ເທິງບ່ອນນອນ ອະທິບາຍວ່າ ເສນາສະນະ ຕັດຮຽກວ່າ ບ່ອນນອນ ໄດ້ແກ່ວິຫານ ເຮືອນຫຼັງຄາດ້ານດຽວ ຜາສາດ ເຮືອນໂລ້ນ ຖ້ຳ ລວມຄວາມວ່າ ເທິງບ່ອນນອນສູງແລະໃຫຍ່

ຄຳວ່າ ຮ້ອງຢູ່ ໃນຄຳວ່າ ຮ້ອງຢູ່ ຯລຯ ເຊິ່ງເປັນທີ່ມີອາລົມທີ່ໜ້າຫວາດສຽວ ໄດ້ແກ່ ຮ້ອງຢູ່ ຄື ຮ້ອງດັງ ສົ່ງສຽງຮ້ອງ ສົ່ງສຽງດັງ

ອີກໄນໜຶ່ງ ຄຳວ່າ ຮ້ອງຢູ່ ອະທິບາຍວ່າ ອາລົມໜ້າຫວາດສຽວມີເທົ່າໃດ ມີປະມານເທົ່າໃດ ມີຂະໜາດໃດ ມີຫຼາຍປານໃດ ກໍຮ້ອງສ່ຳນັ້ນ

ຄຳວ່າ ອາລົມທີ່ໜ້າຫວາດສຽວ ໄດ້ແກ່ ສິງໃຫຍ່ ເສືອໂຄ່ງ ເສືອເຫຼືອງ ໝີ ເສືອດາວ ໝາປ່າ ງົວ ກະບື ຊ້າງ ງູ ແມງງອດ ຂີ້ເຂັບ ໂຈນ ຄົນທີ່ໄດ້ກໍ່ກຳໄວ້ ຫຼື ຍັງບໍ່ໄດ້ກໍ່ກຳໄວ້ ລວມຄວາມວ່າ ຮ້ອງຢູ່ ຯລຯ ເຊິ່ງເປັນທີ່ມີອາລົມທີ່ໜ້າຫວາດສຽວ

ຄຳວ່າ ອາລົມທີ່ໜ້າຫວາດສຽວເຫຼົ່າໃດ ໃນຄຳວ່າ ພິກຂຸ ຯລຯ ເຫັນອາລົມທີ່ໜ້າຫວາດສຽວເຫຼົ່າໃດແລ້ວ ບໍ່ເພິ່ງຫວັ່ນໄຫວ ໄດ້ແກ່ ພິກຂຸເຫັນ ຫຼື ໄດ້ຍິນອາລົມທີ່ໜ້າຫວາດສຽວເຫຼົ່າໃດແລ້ວບໍ່ເພິ່ງຫວັ່ນໄຫວ ຄື ບໍ່ເພິ່ງສັ່ນເຊນ ບໍ່ເພິ່ງກະສັບກະສ່າຍ ບໍ່ເພິ່ງຫວາດສຽວ ບໍ່ເພິ່ງເກງກົວ

ບໍ່ເພິ່ງຫວາດກົວ ບໍ່ເພິ່ງຢ້ານກົວ ບໍ່ເພິ່ງເຖິງຄວາມສະດຸ້ງ ໄດ້ແກ່ ເພິ່ງເປັນຜູ້ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ເພິ່ງເປັນຜູ້ລະໄພ ແລະ ຄວາມຢ້ານກົວ ໝົດຄວາມຂົນພອງສະຫຍອງຫົວຢູ່ ລວມຄວາມວ່າ ພິກຂຸ ໆລໆ ເຫັນອາລົມທີ່ໜ້າຫວາດສຽວເຫຼົ່າໃດແລ້ວ ບໍ່ເພິ່ງຫວັ່ນໄຫວ

ຄຳວ່າ ເທິງບ່ອນນັ່ງບ່ອນນອນອັນບໍ່ມີສຽງອື້ອຶງ ໄດ້ແກ່ ເທິງເສນາສະນະທີ່ມີສຽງ ໜ້ອຍມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບ ຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກ ລວມຄວາມວ່າ ເທິງບ່ອນນັ່ງບ່ອນນອນອັນບໍ່ມີສຽງອື້ອຶງ ດ້ວຍເຫດນັ້ນ ພຣະສາຣີບຸດເຖຣະຈຶ່ງກ່າວວ່າ

ພິກຂຸຢູ່ເທິງບ່ອນນອນບ່ອນນັ່ງອັນບໍ່ມີສຽງອື້ອຶງ
ເຫັນອາລົມທີ່ໜ້າຫວາດສຽວເຫຼົ່າໃດແລ້ວ ບໍ່ເພິ່ງຫວັ່ນໄຫວ
ພິກຂຸ (ອື່ນ) ເພິ່ງຫວັ່ນໄຫວຮ້ອງຢູ່ເທິງບ່ອນນອນສູງ ແລະໃຫຍ່
ເຊິ່ງເປັນທີ່ມີອາລົມທີ່ໜ້າຫວາດສຽວ

[໑໙໔] (ພຣະສາຣີບຸດເຖຣະກ່າວວ່າ)

ພິກຂຸເມື່ອຈະໄປສູ່ທິດທີ່ບໍ່ເຄີຍໄປ
ເພິ່ງປາບປາມອັນຕະລາຍເທົ່າທີ່ມີຢູ່ໃນໂລກ
ເທິງບ່ອນນັ່ງບ່ອນນອນອັນງຽບສະຫງັດ

ຄຳວ່າ ເທົ່າທີ່ມີຢູ່ ໃນຄຳວ່າ ອັນຕະລາຍເທົ່າທີ່ມີຢູ່ໃນໂລກ ໄດ້ແກ່ ເທົ່າທີ່ມີຢູ່ ຄື ມີປະມານເທົ່າໃດ ມີຂະໜາດໃດ ມີຫຼາຍສ່ຳໃດ

ຄຳວ່າ ອັນຕະລາຍ ໄດ້ແກ່ ອັນຕະລາຍ ໒ ຢ່າງ ຄື (໑) ອັນຕະລາຍທີ່ຜາກົດ (໒) ອັນຕະລາຍທີ່ບໍ່ຜາກົດ

ອັນຕະລາຍທີ່ຜາກົດ ຄື ອັນໃດ?

ຄື ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ເສືອດາວ ໝາປ່າ ງົວ ກະບື ຊ້າງ ງູ ແມງງອດ ຂີ້ເຂັບ ໂຈນ ຄົນທີ່ໄດ້ກໍ່ກຳໄວ້ ຫຼື ຍັງບໍ່ໄດ້ກໍ່ກຳໄວ້ ໂຣກທາງຕາ ໂຣກທາງຫູ ໂຣກທາງດັງ ໂຣກທາງລີ້ນ ໂຣກທາງກາຍ ໂຣກຫົວ ໂຣກຫູ ໂຣກປາກ ໂຣກແຂ້ວ ໂຣກໄອ ໂຣກຫືດໄຂ້ຫວັດ ໄຂ້ພິດ ໄຂ້ເຊື່ອງຊຶມ ໂຣກທ້ອງ ເປັນລົມສະຫຼົບ ລົງແດງ ຈຸກສຽດ ອະຫິວາຕົກໂຣກໂຣກຂີ້ທູດ ຝີ ກາກ ມອງຄໍ່ ລົມບ້າໝູ ຫິດເປື່ອຍ ຫິດດ້ານ ຫິດ ທູດ ໂຣກລະລອກ ໂຣກະບິຊ່ານ ໂຣກເບົາຫວານ ໂຣກເຣີມ ໂຣກພຸພອງ ໂຣກຣິດສີດວງທະວານ ຄວາມເຈັບປ່ວຍທີ່ເກີດຈາກບີ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຄວາມເຈັບປ່ວຍທີ່ເກີດຈາກລົມ ໄຂ້ສັນນິບາດຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນ

ອີລິຍາບົດບໍ່ໄດ້ສ່ວນກັນ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດອຸດຈາຣະ ປວດປັດສາວະ ຄວາມເຈັບປ່ວຍທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະ ສັດເລືອຄານເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ຜາກົດ

ອັນຕະລາຍທີ່ບໍ່ຜາກົດ ຄື ອັນໃດ?

ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ກາມສັນທະນິວອນ ພະຍາບາດນິວອນ ຖີນະມິດທະນິວອນ ອຸດທັດຈະກຸກກຸດຈະນິວອນ ວິຈິກິດສານິວອນ ຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະ ມັກຂະ ປະລາສະ ອິດສາ ມັດສະຣິຍະ ມາຍາ ສາເຖີຍຍະ ຖຳພະ ສາຣຳພະ ມານະ ອະຕິມານະ ມະທະ ປະມາທະ ກິເລດທຸກຊະນິດ ທຸດຈະຣິດທຸກທາງ ຄວາມກະວົນກະວາຍທຸກຢ່າງ ຄວາມຮ້ອນຮົນທຸກສະຖານ ຄວາມເດືອດຮ້ອນທຸກປະການ ອະກຸສະລາພິສັງຂານທຸກປະເພດ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ບໍ່ຜາກົດ

ຄຳວ່າ ອັນຕະລາຍ ອະທິບາຍວ່າ ຊື່ວ່າອັນຕະລາຍ ຍ້ອນມີຄວາມໝາຍແນວໃດ

ຊື່ວ່າອັນຕະລາຍ ຍ້ອນຄອບງຳ

ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ

ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ

ທີ່ຊື່ວ່າ ອັນຕະລາຍ ຍ້ອນຄອບງຳ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນຍ່ອມເຂົ້າຄອບຄອງ ຢຶດຄອງ ຄອບງຳ ຖ້ວມທັບ ຮັດຄຶງ ຍ່ຳຍີບຸກຄົນນັ້ນ ທີ່ຊື່ວ່າອັນຕະລາຍ ຍ້ອນຄອບງຳ ເປັນແນວນີ້

ທີ່ຊື່ວ່າ ອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມເສື່ອມ ຄື ເພື່ອຄວາມສູນໄປແຫ່ງກຸ ສົນທຳທັງຫຼາຍ ກຸສົນທຳອັນໃດແດ່ ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມເສື່ອມ ຄື ເພື່ອຄວາມສູນໄປແຫ່ງກຸສົນທຳເຫຼົ່ານີ້ ຄື ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ຄາດເຄື່ອນ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ (ຕາ ຫູ ດັງ ລີ້ນ ກາຍ ໃຈ) ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ຄວາມໝັ່ນຈະເລີນສະຕິປັດຖານ ໔ ຄວາມໝັ່ນຈະເລີນສຳມັບປະທານ ໔ ຄວາມໝັ່ນຈະເລີນອິດທິບາດ ໔ ຄວາມໝັ່ນຈະເລີນອິນຊີ ໕ ຄວາມໝັ່ນຈະເລີນພະລະ ໕ ຄວາມໝັ່ນຈະເລີນໂພດຊົງ ໗ ຄວາມໝັ່ນຈະເລີນອະຣິຍະມັກມີອົງ ໘ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວນີ້

ທີ່ຊື່ວ່າ ອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວໃດ?

ຄື ບາບອະກຸສົນທຳເຫຼົ່ານີ້ ຍ່ອມເກີດຂຶ້ນໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສ ປຽບເໝືອນສັດທີ່ອາໄສຮູຍ່ອມຢູ່ໃນຮູ ສັດທີ່ອາໄສນ້ຳຍ່ອມຢູ່ໃນນ້ຳ ສັດທີ່ອາໄສປ່າຍ່ອມຢູ່ໃນປ່າ ສັດທີ່ອາໄສຕົ້ນໄມ້ຍ່ອມຢູ່ເທິງຕົ້ນໄມ້ ສັນໃດ ບາບອະກຸສົນທຳເຫຼົ່ານີ້ ຍ່ອມເກີດໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສ ສັນນັ້ນຄືກັນ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ເປັນແນວໃດ? ພິກຂຸທັງຫຼາຍ ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນຕາເຫັນຮູບ ບາບອະກຸສົນທຳທັງຫຼາຍ ຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ ຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ

ພິກຂຸທັງຫຼາຍ ອີກໄນໜຶ່ງ ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຫູໄດ້ຍິນສຽງ ຯລຯ ຍ້ອນດັງໄດ້ກິ່ນ ຯລຯ ຍ້ອນລີ້ນໄດ້ຊີມຣົດ ຯລຯ ຍ້ອນກາຍໄດ້ຮັບສຳຜັດ ຯລຯ ຍ້ອນໃຈຮູ້ທຳມາຣົມ ບາບອະກຸສົນທຳທັງຫຼາຍຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກ ພິກຂຸນັ້ນວ່າ ຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນແນວນັ້ນ ຈຶ່ງຕັດຮຽກພິກຂຸນັ້ນວ່າ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນ ພິກຂຸທັງຫຼາຍ ແນວນີ້ແລ ພິກຂຸຜູ້ຢູ່ກັບກິເລດທີ່ນອນເນື່ອງຢູ່ພາຍໃນ ຜູ້ຢູ່ກັບກິເລດທີ່ຟຸ້ງຂຶ້ນຍ່ອມຢູ່ເປັນທຸກ ບໍ່ສະບາຍ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້ແດ່

## ວ່າດ້ວຍທຳ ໓ ປະການ ເປັນມົນທິນພາຍໃນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ທຳ ໓ ປະການເຫຼົ່ານີ້ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນທຳ ໓ ປະການ ອັນໃດແດ່ ຄື

໑. ໂລພະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນເປັນ ເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໘. ໂທສະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໙. ໂມຫະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

ພິກຂຸທັງຫຼາຍ ທຳ ໓ ປະການເຫຼົ່ານີ້ແລ ຊື່ວ່າເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂລພະເຮັດໃຫ້ຈິດກຳເຮີບ ໂລພະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂລບບໍ່ຮູ້ຈັກຜົນ ຄົນໂລບບໍ່ຮູ້ຈັກເຫດ
ຄວາມໂລບຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ໂທສະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂທສະເຮັດໃຫ້ຈິດກຳເຮີບ ໂທສະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂກດບໍ່ຮູ້ຈັກຜົນ ຄົນໂກດບໍ່ຮູ້ຈັກເຫດ
ຄວາມໂກດຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ
ໂມຫະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂມຫະເຮັດໃຫ້ຈິດກຳເຮີບ ໂມຫະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນຫຼົງບໍ່ຮູ້ຈັກຜົນ ຄົນຫຼົງບໍ່ຮູ້ຈັກເຫດ
ຄວາມຫຼົງຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວນີ້ແດ່ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ມະຫາບໍພິດ ທຳ ໓ ປະການ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ ທຳ ໓ ປະການ ອັນໃດແດ່ ຄື

໑. ໂລພະທຳເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂື້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ
໒. ໂທສະທຳເມື່ອເກີດຂື້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂື້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ
໓. ໂມຫະທຳເມື່ອເກີດຂື້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂື້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ມະຫາບໍພິດ ທຳ ໓ ປະການເຫຼົ່ານີ້ແລ ເມື່ອເກີດຂື້ນພາຍໃນ (ຈິດ) ຂອງບຸຣຸດຍ່ອມເກີດຂື້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະ ໂທສະ ແລະໂມຫະ ເກີດຂື້ນໃນຕົນ
ຍ່ອມທຳຮ້າຍບຸຣຸດຜູ້ມີຈິດຊົ່ວຊາມ
ເໝືອນຂີໄຜ່ກຳຈັດຕົ້ນໄຜ່ ສັນນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວ ນີ້ແດ່ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຣາຄະ ແລະ ໂທສະ ມີອັດຕະພາບນີ້ເປັນຕົ້ນເຫດ
ຄວາມບໍ່ຍິນດີກຸສົນທຳ
ຄວາມຍິນດີກາມມະຄຸນ ເຊິ່ງເຮັດໃຫ້ຂົນລຸກ ເກີດຈາກອັດຕະພາບນີ້
ບາບວິຕົກໃນໃຈ ເກີດຂື້ນຈາກອັດຕະພາບນີ້
ຍ່ອມຜູກໃຈຄົນໄວ້ ເໝືອນພວກເດັກຜູກຕີນກາໄວ້ ສັນນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວນີ້ແດ່

ຄຳວ່າ ໃນໂລກ ໄດ້ແກ່ ໃນມະນຸດໂລກ ລວມຄວາມວ່າ ອັນຕະລາຍເທົ່າທີ່ມີຢູ່ໃນໂລກ

## ວ່າດ້ວຍທິດທີ່ບໍ່ເຄີຍໄປ

ຄຳວ່າ ເມື່ອຈະໄປສູ່ທິດທີ່ບໍ່ເຄີຍໄປ ອະທິບາຍວ່າ ອະມະຕະນິບພານ ຕັດຮຽກວ່າ ທິດທີ່ບໍ່ເຄີຍໄປ ຄື ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ທິດນັ້ນຊື່ວ່າທິດທີ່ບໍ່ເຄີຍໄປ ທິດນັ້ນ ບໍ່ແມ່ນທິດທີ່ເຄີຍໄປ ໂດຍການຍາວນານນີ້

ບຸກຄົນເພິ່ງປະຄອງພາຊະນະນ້ຳມັນ ເຕັມສະເໝີຂອບປາກ
ບໍ່ມີສ່ວນເຫຼືອ ສັນໃດ
ພຣະໂຍຄາວະຈອນເມື່ອປາຖະໜາ (ຈະໄປ) ສູ່ທິດທີ່ຍັງບໍ່ເຄີຍໄປ
ເພິ່ງຮັກສາຈິດຂອງຕົນໄວ້ສະເໝີ ສັນນັ້ນ

ເມື່ອພິກຂຸດຳເນີນໄປ ເມື່ອຈະໄປ ຄື ເມື່ອກ້າວໄປສູ່ທິດທີ່ບໍ່ເຄີຍໄປ ລວມຄວາມວ່າ ເມື່ອຈະໄປສູ່ທິດທີ່ບໍ່ເຄີຍໄປ

ຄຳວ່າ ອັນຕະລາຍ ໃນຄຳວ່າ ພິກຂຸ ຯລຯ ເພິ່ງປາບປາມອັນຕະລາຍ ອະທິບາຍວ່າ ເພິ່ງປາບປາມ ຄື ຄອບງຳ ກຳຈັດ ຂັບໄລ່ ຍ່ຳຍີອັນຕະລາຍ ລວມຄວາມວ່າ ພິກຂຸ ຯລຯ ເພິ່ງປາບປາມອັນຕະລາຍ

ຄຳວ່າ ເທິງບ່ອນນັ່ງບ່ອນນອນອັນງຽບສະຫງັດ ອະທິບາຍວ່າ ເທິງບ່ອນນັ່ງບ່ອນນອນທີ່ຢູ່ປາຍແດນອັນສະຫງັດ ຄື ເປັນບ່ອນສຸດຮອບ ມີພູເຂົາເປັນບ່ອນສຸດ ມີປ່າເປັນບ່ອນສຸດ ມີແມ່ນ້ຳເປັນບ່ອນສຸດ ຫຼື ມີແຫຼ່ງນ້ຳເປັນບ່ອນສຸດ ເປັນສະຖານທີ່ພວກມະນຸດບໍ່ໄຖ ບໍ່ຫວ່ານ ບໍ່ເປັນບ່ອນທ່ອງທ່ຽວຂອງມະນຸດ ຍ້ອນເລີຍເຂດຊຸມຊົນ ລວມຄວາມວ່າ ເທິງບ່ອນນັ່ງບ່ອນນອນອັນງຽບສະຫງັດ ດ້ວຍເຫດນັ້ນ ພຣະສາຣີບຸດເຖຣະຈຶ່ງກ່າວວ່າ

ພິກຂຸເມື່ອຈະໄປສູ່ທິດທີ່ບໍ່ເຄີຍໄປ
ເພິ່ງປາບປາມອັນຕະລາຍເທົ່າທີ່ມີຢູ່ໃນໂລກ
ເທິງບ່ອນນັ່ງບ່ອນນອນອັນງຽບສະຫງັດ

[໑໘໖] (ພຣະສາຣີບຸດເຖຣະກ່າວວ່າ)

ພິກຂຸອົບຮົມຕົນຢູ່ ເພິ່ງມີແນວທາງແຫ່ງຄຳເວົ້າແນວໃດ
ເພິ່ງມີໂຄຈອນໃນສາດສະໜານີ້ແນວໃດ ເພິ່ງມີສິນ ແລະຂໍ້ວັດແນວໃດ

ຄຳວ່າ ເພິ່ງມີແນວທາງແຫ່ງຄຳເວົ້າແນວໃດ ອະທິບາຍວ່າ ພຣະເຖຣະຖາມເຖິງຄວາມບໍລິສຸດແຫ່ງວາຈາວ່າ ພິກຂຸນັ້ນເພິ່ງປະກອບດ້ວຍວິທີການເວົ້າເຊັ່ນໃດ ຄື ຕັ້ງໄວ້ແນວໃດ ມີປະການແນວໃດ ປຽບໄດ້ກັບອັນໃດ

## ວ່າດ້ວຍຄວາມບໍລິສຸດແຫ່ງວາຈາ

ຄວາມບໍລິສຸດແຫ່ງວາຈາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ລະການກ່າວຕົວະ ເວັ້ນຂາດຈາກການກ່າວຕົວະໄດ້ແລ້ວ ຄື ເປັນຄົນເວົ້າຈິງ ຕັ້ງໝັ້ນໃນຄວາມສັດ ມີຄຳເວົ້າໝັ້ນຄົງ ເຊື່ອຖືໄດ້ ບໍ່ກ່າວຄຳຫຼອກລວງຊາວໂລກ

ລະວາຈາສັບສໍ່ ເວັ້ນຂາດຈາກວາຈາສັບສໍ່ໄດ້ແລ້ວ ຟັງຈາກຂ້າງນີ້ແລ້ວ ບໍ່ໄປບອກຂ້າງນັ້ນ ເພື່ອທຳລາຍຄົນໝູ່ນີ້ ຟັງຈາກຂ້າງນັ້ນແລ້ວ ບໍ່ມາບອກຂ້າງນີ້ ເພື່ອທຳລາຍຄົນໝູ່ນັ້ນ ເປັນຜູ້ສະໝານຄົນທີ່ແຕກແຍກກັນ ຫຼື ສົ່ງເສີມຄົນທີ່ມີປະໂຫຍດຮ່ວມກັນ ມີຄວາມສາມັກຄີເປັນທີ່ຊື່ນຊົມ ຍິນດີໃນຄວາມສາມັກຄີ ພໍໃຈໃນສາມັກຄີທຳ ເປັນຜູ້ກ່າວວາຈາກໍ່ໃຫ້ເກີດຄວາມສາມັກຄີ ລະວາຈາຫຍາບ ເວັ້ນຂາດຈາກວາຈາຫຍາບໄດ້ແລ້ວ ວາຈາໃດ ຂາດໂທດ ສະບາຍຫູ ໜ້າຮັກ ຈັບໃຈແບບຊາວເມືອງ ຄົນສ່ວນໃຫຍ່ພໍໃຈ ກໍກ່າວວາຈາເຊັ່ນນັ້ນ ລະການເວົ້າເພີ້ເຈີ້ ເວັ້ນຂາດຈາກການເວົ້າເພີ້ເຈີ້ໄດ້ແລ້ວ ເວົ້າຖືກເວລາ ເວົ້າຈິງ ເວົ້າອີງອັດຖະ ເວົ້າອີງທຳ ເວົ້າອີງວິໄນ ກ່າວວາຈາມີຫຼັກຖານ ມີທີ່ອ້າງອີງ ມີຕົ້ນມີປາຍ ປະກອບດ້ວຍປະໂຫຍດຕາມການອັນສົມຄວນ ປະກອບດ້ວຍອະຈີສຸດຈະຣິດ ໔ ກ່າວວາຈາປາສະຈາກໂທດ ໔ ສະຖານ ເປັນຜູ້ງົດແລ້ວ ງົດເວັ້ນແລ້ວ ເວັ້ນຂາດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວກັບເດຍຣັດສານກະຖາ ໓໔ ປະການ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່

ທ່ານຍ່ອມກ່າວກະຖາວັດຖຸ ໑໐ ປະການ ຄື

໑. ອັບປິດສະກະຖາ (ຄຳເວົ້າທີ່ນຳພາໃຫ້ມີຄວາມປາຖະໜາໜ້ອຍ)
໔. ສັນຕຸດຖິກະຖາ (ຄຳເວົ້າທີ່ນຳພາໃຫ້ມີຄວາມສັນໂດດ)
໓. ປະວິເວກກະຖາ (ຄຳເວົ້າທີ່ນຳພາໃຫ້ມີຄວາມສະຫງັດກາຍໃຈ)
໔. ອະສັງສັກຄະກະຖາ (ຄຳເວົ້າທີ່ນຳພາໃຫ້ບໍ່ຄຸກຄີດ້ວຍໝູ່)
໕. ວິຣິຍາຣຳພະກະຖາ (ຄຳເວົ້າທີ່ນຳພາໃຫ້ມຸ້ງໝັ້ນທຳຄວາມພຽນ)
໖. ສີລະກະຖາ (ຄຳເວົ້າທີ່ນຳພາໃຫ້ຕັ້ງຢູ່ໃນສີນ)
໗. ສະມາທິກະຖາ (ຄຳເວົ້າທີ່ນຳພາໃຫ້ກະທຳຈິດໝັ້ນ)
໗. ປັນຍາກະຖາ (ຄຳເວົ້າທີ່ນຳພາໃຫ້ເກີດປັນຍາ)
໙. ວິມຸດຕິກະຖາ (ຄຳເວົ້າທີ່ນຳພາໃຫ້ເຮັດໃຈໃຫ້ພົ້ນຈາກກິເລດ ແລະຄວາມທຸກ)
໑໐. ວິມຸດຕິຍານະທັດສະນະກະຖາ (ຄຳເວົ້າທີ່ນຳພາໃຫ້ສົນໃຈ ແລະ ເຂົ້າໃຈເລື້ອງຄວາມຮູ້ຄວາມເຫັນໃນພາວະທີ່ຫຼຸດພົ້ນຈາກກິເລດ ແລະ ຄວາມທຸກ)

ຍ່ອມກ່າວ ສະຕິປັດຖານະກະຖາ ສຳມັບປະທານະກະຖາ ອິດທິບາດກະຖາ ອິນທະຣິຍະກະຖາ ພະລະກະຖາ ໂພດຊົງກະຖາ ມັກຄະກະຖາ ຜະລະກະຖາ ນິບພານກະຖາ ພິກຂຸເປັນຜູ້ສັງລວມຣະວັງ ຣະມັດຣະວັງ ຄຸ້ມຄອງ ປົກປັກ ຮັກສາ ສັງວອນດ້ວຍວາຈາ ນີ້ຊື່ວ່າຄວາມບໍລິສຸດແຫ່ງວາຈາ ພິກຂຸເພິ່ງເປັນຜູ້ປະກອບດ້ວຍຄວາມບໍລິສຸດແຫ່ງວາຈາເຊັ່ນນີ້ ລວມຄວາມວ່າ ເພິ່ງມີແນວທາງແຫ່ງຄຳເວົ້າແນວໃດ

ຄຳວ່າ ເພິ່ງມີໂຄຈອນໃນສາດສະໜານີ້ແນວໃດ ອະທິບາຍວ່າ ພຣະເຖຣະຖາມເຖິງໂຄດວ່າ ພິກຂຸເພິ່ງປະກອບດ້ວຍໂຄຈອນເຊັ່ນໃດ ຄື ຕັ້ງໄວ້ແນວໃດ ມີປະການແນວໃດ ປຽບໄດ້ກັບອັນໃດ ໂຄຈອນກໍມີ ອະໂຄຈອນກໍມີ

## ວ່າດ້ວຍອະໂຄຈອນ ແລະ ໂຄຈອນ

ອະໂຄຈອນ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ມີແມ່ຍິງແພດສະຫຍາເປັນໂຄຈອນ ມີແມ່ຍິງ ໝ້າຍເປັນໂຄຈອນ ມີສາວແກ່ເປັນໂຄຈອນ ມີບັນເດາະເປັນໂຄຈອນ ມີພິກຂຸນີເປັນໂຄຈອນ ຫຼືມີຮ້ານສຸຣາເປັນໂຄຈອນ ເປັນຜູ້ຢູ່ຄຸກຄີກັບພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ສາວົກເດຍຣະຖີ ດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ ຫຼື ເສບຄົບ ເຂົ້າໄປນັ່ງໃກ້ ຕະກູນທີ່ບໍ່ມີສັດທາ ບໍ່ເຫຼື້ອມໃສ ບໍ່ເປັນເໝືອນບໍ່ນ້ຳ ມັກດ່າແລະບໍຣິພາດ ປາຖະໜາແຕ່ສິ່ງທີ່ບໍ່ແມ່ນປະໂຫຍດ ປາຖະໜາແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ບໍ່ຜາສຸກ ບໍ່ປາຖະໜາຄວາມຫຼຸດພົ້ນຈາກໂຍຄະແກ່ພວກພິກຂຸ ພິກຂຸນີ ອຸປາສົກ ແລະ ອຸປາສິກາ ເຊັ່ນນັ້ນ ນີ້ຮຽກວ່າອະໂຄຈອນ

ອີກໄນໜຶ່ງ ພິກຂຸເຂົ້າສູ່ບໍລິເວນເຮືອນ ຍ່າງໄປຕາມຖະໜົນບໍ່ສັງລວມ ຍ່າງເບິ່ງຊ້າງເບິ່ງມ້າ ເບິ່ງລົດ ເບິ່ງພົນຍ່າງ ເບິ່ງສະຕີ ເບິ່ງບຸຣຸດ ເບິ່ງເດັກຊາຍ ເບິ່ງເດັກຍິງ ເບິ່ງຮ້ານຕະຫຼາດ ເບິ່ງໜ້າມຸກເຮືອນ ເບິ່ງຂ້າງເທິງ ເບິ່ງຂ້າງລຸ່ມ ເບິ່ງທິດນ້ອຍທິດໃຫຍ່ ແມ່ນນີ້ກໍຕັດຮຽກວ່າອະໂຄຈອນ

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ລວບຖື ແຍກຖື ຯລຯ ຍ່ອມບໍ່ປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ບໍ່ຮັກສາມະນິນຊີ ບໍ່ເຖິງຄວາມສັງລວມໃນມະນິນຊີ ແມ່ນນີ້ກໍຕັດ ຮຽກວ່າອະໂຄຈອນ

ອີກໄນໜຶ່ງ ພິກຂຸເປັນຜູ້ຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນທຳເຫັນປານນີ້ຢູ່ ເໝືອນສະມະນະພາມຜູ້ຈະເລີນບາງພວກບໍຣິໂພກອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວຍັງຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ຄື ການຟ້ອນ ການຂັບຮ້ອງການເສບດົນຕີ ການເບິ່ງມະໂຫລະສົບ ການເລົ່ານິທານ ການຫຼິ້ນຕົບມື ການຫຼິ້ນປຸກຜີ ການຫຼິ້ນຕີກອງ ການສ້າງສາກບ້ານເມືອງໃຫ້ສວຍງາມ ການລະຫຼິ້ນຂອງຄົນຈັນທານ ການຫຼິ້ນແປ້ນໂຍກການລະຫຼິ້ນໜ້າສົບ ການແຂ່ງຊົນຊ້າງ ການແຂ່ງມ້າ ການແຂ່ງຊົນກະບື ການແຂ່ງຊົນງົວ ການແຂ່ງຊົນແບ້ ການແຂ່ງຊົນແກະ ການແຂ່ງຕີໄກ່ ການແຂ່ງຕີນົກກະທາ ການຣຳກະບີ່ກະບອງ

ການຊົກມວຍ ມວຍປ້ຳ ການກວດພົນສວນສະໜາມ ການຈັດກະບວນທັບ ແມ່ນນີ້ກໍຕັດຮຽກວ່າ ອະໂຄຈອນ

ແມ່ນກາມມະຄຸນ ໕ ກໍຊື່ວ່າອະໂຄຈອນ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ພວກທ່ານຢ່າທ່ຽວໄປໃນແດນອື່ນທີ່ເປັນອະໂຄຈອນ ພິກຂຸທັງຫຼາຍ ເມື່ອພວກທ່ານທ່ຽວໄປໃນແດນອື່ນທີ່ເປັນອະໂຄຈອນ ມານກໍຈັກໄດ້ປ່ອງ ຈັກໄດ້ອາລົມ ພິກຂຸທັງຫຼາຍ ແດນອື່ນທີ່ເປັນອະໂຄຈອນຂອງພິກຂຸ ເປັນແນວໃດ? ຄື ກາມມະຄຸນ ໕ ກາມມະຄຸນ ໕ ອັນໃດແດ່ ຄື

໑. ຮູບທີ່ຮູ້ໄດ້ທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ຮູ້ໄດ້ທາງຫູ ฯລฯ
໓. ກິ່ນທີ່ຮູ້ໄດ້ທາງດັງ ฯລฯ
໔. ຣົດທີ່ຮູ້ໄດ້ທາງລີ້ນ ฯລฯ
໕. ໂຜດຖັບພະທີ່ຮູ້ໄດ້ທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ນີ້ຕະຖາຄົດຮຽກວ່າ ແດນອື່ນອັນເປັນອະໂຄຈອນຂອງພິກຂຸ ແມ່ນນີ້ກໍຕັດຮຽກວ່າ ອະໂຄຈອນ

ໂຄຈອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ເປັນຜູ້ມີແມ່ຍິງແພດສະຫຍາເປັນໂຄຈອນ ບໍ່ເປັນຜູ້ມີແມ່ຍິງໝ້າຍເປັນໂຄຈອນ ບໍ່ເປັນຜູ້ມີສາວແກ່ເປັນໂຄຈອນ ບໍ່ເປັນຜູ້ມີບັນເດາະເປັນໂຄຈອນ ບໍ່ເປັນຜູ້ມີນາງພິກຂຸນີເປັນໂຄຈອນ ບໍ່ເປັນຜູ້ມີຮ້ານສຸຣາເປັນໂຄຈອນ ບໍ່ຢູ່ຄຸກຄີກັບພຣະຣາຊາ ມະຫາອຳມາດ ຂອງພຣະຣາຊາ ເດຍຣະຖີ ສາວົກເດຍຣະຖີ ດ້ວຍການຄຸກຄີກັບຄະຫຼື ທັດທີ່ບໍ່ສົມຄວນ ຫຼືເສບຄົບ ເຂົ້າໄປນັ່ງໃກ້ຕະກູນທີ່ມີສັດທາເຫຼື້ອມໃສ ເປັນເໝືອນບໍ່ນ້ຳ ຮຸ່ງເຮື່ອງໄປດ້ວຍຜ້າກາສາວະ ອົບອວນໄປດ້ວຍກິ່ນຂອງລືສີ ປາຖະໜາແຕ່ສິ່ງທີ່ເປັນປະໂຫຍດ ປາຖະໜາແຕ່ສິ່ງທີ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ຜາສຸກ ປາຖະໜາແຕ່ຄວາມຫຼຸດພົ້ນຈາກໂຍຄະແກ່ພວກພິກຂຸ ພິກຂຸນີ ອຸປາສົກ ແລະອຸປາສິກາເຊັ່ນນັ້ນ ແມ່ນນີ້ກໍຕັດຮຽກວ່າ ໂຄຈອນ

ອີກໄນໜຶ່ງ ພິກຂຸເຂົ້າສູ່ບໍລິເວນເຮືອນ ຍ່າງໄປຕາມຖະໜົນກໍສັງລວມ ບໍ່ຍ່າງເບິ່ງຊ້າງ ເບິ່ງມ້າ ເບິ່ງລົດ ເບິ່ງພົນຍ່າງ ฯລฯ ເບິ່ງທິດນ້ອຍທິດໃຫຍ່ ແມ່ນນີ້ກໍຕັດຮຽກວ່າ ໂຄຈອນ

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ບໍ່ລວບຖື ฯລฯ ເຖິງຄວາມສັງລວມໃນມະນິນຊີ ແມ່ນນີ້ກໍຕັດຮຽກວ່າ ໂຄຈອນ

ອີກໄນໜຶ່ງ ພິກຂຸງົດເວັ້ນຈາກຄວາມຂວນຂວາຍເບິ່ງການລະຫຼິ້ນ ອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ຢູ່ ເໝືອນສະມະນະພາມຜູ້ຈະເລີນບາງພວກບໍຣິໂພກອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ບໍ່ພາກັນຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ຄື ການຟ້ອນ ການຂັບຮ້ອງ ການເສບດົນຕີ ຯລຯ ແມ່ນນີ້ກໍຕັດຮຽກວ່າ ໂຄຈອນ

ແມ່ນສະຕິປັດຖານ ໔ ກໍຊື່ວ່າ ໂຄຈອນ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ພວກທ່ານຈົ່ງທ່ຽວໄປໃນແດນບິດາຂອງຕົນອັນເປັນໂຄຈອນເທີ້ນ ພິກຂຸທັງຫຼາຍ ເມື່ອ ພວກທ່ານທ່ຽວໄປໃນແດນບິດາຂອງຕົນອັນເປັນໂຄຈອນ ມານກໍຈັກບໍ່ໄດ້ປ່ອງ ບໍ່ໄດ້ອາລົມ ພິກຂຸທັງຫຼາຍ ແດນບິດາຂອງຕົນອັນເປັນໂຄຈອນ ເປັນແນວໃດ? ຄື ສະຕິປັດຖານ ໔ ສະຕິປັດຖານ ໔ ຄື ອັນໃດແດ່ ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ແດນບິດາຂອງຕົນອັນເປັນໂຄຈອນ ແມ່ນນີ້ກໍຕັດຮຽກວ່າ ໂຄຈອນ ພິກຂຸເພິ່ງເປັນຜູ້ປະກອບດ້ວຍໂຄຈອນເຊັ່ນນີ້ ລວມຄວາມວ່າ ເພິ່ງມີໂຄຈອນໃນສາດສະໜານີ້ ແນວໃດ

## ວ່າດ້ວຍສີນ ແລະ ຂໍ້ວັດ

ຄຳວ່າ ເພິ່ງມີສີນ ແລະ ຂໍ້ວັດແນວໃດ ອະທິບາຍວ່າ ພຣະສາຣີບຸດເຖຣະຖາມເຖິງຄວາມບໍລິສຸດແຫ່ງສີນ ແລະ ຂໍ້ວັດວ່າ ພິກຂຸເພິ່ງປະກອບດ້ວຍສີນ ແລະ ຂໍ້ວັດເຊັ່ນໃດ ຄືຕັ້ງໄວ້ແນວໃດ ມີປະການແນວໃດ ປຽບທຽບໄດ້ກັບອັນໃດ ຄວາມບໍລິສຸດແຫ່ງສີນ ແລະ ຂໍ້ວັດ ເປັນແນວໃດ? ເປັນສີນ ແລະ ຂໍ້ວັດກໍມີ ເປັນຂໍ້ວັດແຕ່ບໍ່ແມ່ນສີນກໍມີ

ເປັນສີນ ແລະ ຂໍ້ວັດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ສົມບູນດ້ວຍອາຈາຣະ ແລະ ໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາຢູ່ໃນ ສິກຂາບົດທັງຫຼາຍ ຄວາມສັງລວມ ຄວາມສັງວອນ ການບໍ່ລ່ວງລະເມີດໃນສິກຂາບົດເຫຼົ່ານັ້ນ ນີ້ຊື່

ວ່າສິນ ການສະມາທານ ຊື່ວ່າຂໍ້ວັດ ຊື່ວ່າສິນ ຍ້ອນມີຄວາມໝາຍວ່າ ສັງວອນຊື່ວ່າຂໍ້ວັດ ຍ້ອນມີຄວາມໝາຍວ່າສະມາທານ ນີ້ຮຽກວ່າ ສິນ ແລະ ຂໍ້ວັດ

ເປັນຂໍ້ວັດແຕ່ບໍ່ແມ່ນສິນ ເປັນແນວໃດ?
ຄື ທຸດົງ ໑໓ ຂໍ້ ໄດ້ແກ່

໑. ອາຣັນຍິກັງຄະທຸດົງ
໒. ປິນດະປາຕິກັງຄະທຸດົງ
໓. ປັງສຸກູລິກັງຄະທຸດົງ
໔. ເຕຈີວະຣິກັງຄະທຸດົງ
໕. ສະປະທານະຈາຣີກັງຄະທຸດົງ
໖. ຂະລຸປັດສາພັດຕິກັງຄະທຸດົງ
໗. ເນສັດຊິກັງຄະທຸດົງ
໘. ຍະຖາສັນຖະຕິກັງຄະທຸດົງ

ນີ້ຮຽກວ່າ ຂໍ້ວັດບໍ່ແມ່ນສິນ

ແມ່ນການສະມາທານຄວາມພຽນ ກໍຮຽກວ່າ ຂໍ້ວັດບໍ່ແມ່ນສິນ ພິກຂຸປະຄອງຈິດມຸ້ງໝັ້ນວ່າ ຊີ້ນ ແລະ ເລືອດໃນຮ່າງກາຍຈົ່ງເຫືອດແຫ້ງໄປ ຈະເຫຼືອຢູ່ແຕ່ໜັງເອັນກະດູກກໍຕາມເທີ້ນ ຜົນໃດເພິ່ງບັນລຸໄດ້ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍກຳລັງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມສູ້ຊົນຂອງບຸຣຸດ (ຖ້າ) ບໍ່ໄດ້ບັນລຸຜົນນັ້ນແລ້ວກໍຈັກບໍ່ຢຸດຄວາມພຽນ ແມ່ນການສະມາທານຄວາມພຽນແນວນີ້ຮຽກວ່າ ຂໍ້ວັດບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ

ເມື່ອເຮົາຍັງຖອນລູກສອນຄືຕັນຫາຂຶ້ນບໍ່ໄດ້
ເຮົາຈະບໍ່ກິນ ບໍ່ດື່ມ ບໍ່ອອກໄປຈາກວິຫານ
ຈະບໍ່ເອນກາຍນອນ

ການສະມາທານຄວາມພຽນແນວນີ້ຮຽກວ່າ ຂໍ້ວັດບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ຕາບໃດທີ່ຈິດຂອງເຮົາຍັງບໍ່ຫຼຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຍຶດໝັ້ນ ຕາບນັ້ນເຮົາຈັກບໍ່ເຮັດລາຍບັນລັງນີ້ເລີຍ ແມ່ນການສະມາທານຄວາມພຽນແນວນີ້ຮຽກວ່າ ຂໍ້ວັດບໍ່ແມ່ນສິນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ຕາບໃດທີ່ຈິດຂອງເຮົາຍັງບໍ່ຫຼຸດພົ້ນຈາກອາສະວະ ທັງຫຼາຍຍ້ອນບໍ່ຍຶດໝັ້ນ ຕາບນັ້ນເຮົາກໍຈັກບໍ່ລຸກຈາກບ່ອນນັ່ງ ຯລຯ ບໍ່ລົງຈາກລານຈົງກົມ ຯລຯ ບໍ່ອອກຈາກວິຫານ ຯລຯ ບໍ່ອອກຈາກເຮືອນຫຼັງຄາດ້ານດຽວ ຯລຯ ບໍ່ອອກຈາກຜາສາດ ຯລຯ ບໍ່ອອກຈາກເຮືອນໂລ້ນ ຯລຯ ບໍ່ອອກຈາກຖ້ຳ ຯລຯ ບໍ່ອອກຈາກບ່ອນຫຼີບຫຼີກ ຯລຯ ບໍ່ອອກຈາກກຸດຕິ ຯລຯ ບໍ່ອອກຈາກເຮືອນຍອດ ຯລຯ ບໍ່ອອກຈາກປ້ອມ ຯລຯ ບໍ່ອອກຈາກໂຮງມົນ ຯລຯ ບໍ່

ອອກຈາກເຮືອນທີ່ມີເຄື່ອງກັ້ນ ຯລຯ ບໍ່ອອກຈາກສາລາທໍສັນ ຯລຯ ບໍ່ອອກຈາກມົນດົບ ຯລຯ ບໍ່ອອກຈາກເຫງົ້າໄມ້ນີ້ ແມ່ນການສະມາທານຄວາມພຽນແນວນີ້ຮຽກວ່າ ຂໍ້ວັດບໍ່ແມ່ນສີນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ເຮົາຈັກນໍາມາ ນໍາມາດ້ວຍດີ ບັນລຸໃຫ້ໄວ ເຮັດໃຫ້ແຈ້ງເຊິ່ງອະຣິຍະທໍາ ພາຍໃນເຊົ້າວັນນີ້ ແມ່ນການສະມາທານຄວາມພຽນແນວນີ້ຮຽກວ່າ ຂໍ້ວັດບໍ່ແມ່ນສີນ

ພິກຂຸປະຄອງຈິດມຸ້ງໝັ້ນວ່າ ເຮົາຈັກນໍາມາ ນໍາມາດ້ວຍດີ ບັນລຸ ໃຫ້ໄວ ເຮັດໃຫ້ແຈ້ງເຊິ່ງອະຣິຍະທໍາພາຍໃນທ່ຽງນີ້ ຯລຯ ຄໍ່ານີ້ ຯລຯ ກ່ອນພັດ ຯລຯ ຫຼັງພັດ ຯລຯ ປະຖົມຍາມ ຯລຯ ມັດຊິມະຍາມ ຯລຯ ປັດສິມຍາມ ຯລຯ ຂ້າງແຮມ ຯລຯ ຂ້າງຂຶ້ນ ຯລຯ ລະດູຝົນ ຯລຯ ລະດູໜາວ ຯລຯ ລະດູຮ້ອນ ຯລຯ ປະຖົມໄວ ຯລຯ ມັດຊິມະໄວ ຯລຯ ປັດສິມໄວ ແມ່ນການສະມາທານຄວາມພຽນແນວນີ້ຮຽກວ່າ ຂໍ້ວັດບໍ່ແມ່ນສີນ ນີ້ຊື່ວ່າຄວາມບໍລິສຸດແຫ່ງສີນ ແລະ ຂໍ້ວັດ ພິກຂຸເພິ່ງເປັນຜູ້ປະກອບດ້ວຍຄວາມບໍລິສຸດແຫ່ງ ສີນ ແລະ ຂໍ້ວັດເຊັ່ນນີ້ ລວມຄວາມວ່າ ເພິ່ງມີສີນ ແລະ ຂໍ້ວັດແນວໃດ

## ວ່າດ້ວຍການອົບຮົມຕົນ

ຄໍາວ່າ ອົບຮົມຕົນຢູ່ ໃນຄໍາວ່າ ພິກຂຸອົບຮົມຕົນຢູ່ ອະທິບາຍວ່າ ພິກຂຸຜາຮົບຄວາມພຽນມີເຫື່ອແຮງ ມີຄວາມສູ້ຊົນໝັ້ນຄົງ ບໍ່ປະຖິ້ມສັນທະ ບໍ່ປະຖິ້ມທຸຣະໃນກຸສົນທໍາທັງຫຼາຍ ອີກໄນໜຶ່ງ ພິກຂຸສົ່ງຕົນໄປ ຄື ສົ່ງຕົນໄປໃນປະໂຫຍດຕົນ ໃນຍາຍະ ໃນລັກສະນະ ໃນເຫດ ໃນຖານະ ແລະ ອະຖານະ ຄື ສົ່ງຕົນໄປວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທໍາທັງປວງເປັນອະນັດຕາ ຯລຯ

ສົ່ງຕົນໄປວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຯລຯ ຍ້ອນຊາດເປັນປັດໄຈ ຊະຣາ ແລະ ມໍຣະນະຈຶ່ງມີ ຯລຯ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ ຯລຯ ຍ້ອນຊາດດັບ ຊະຣາແລະ ມໍຣະນະຈຶ່ງດັບ ຯລຯ

ສົ່ງຕົນໄປວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ຯລຯ ເຫຼົ່ານີ້ອາສະວະ ຯລຯ ນີ້ອາສະວະນິໂຣທະຄາມີນີປະຕິປະທາ ຯລຯ

ສົ່ງຕົນໄປວ່າ ເຫຼົ່ານີ້ທໍາທີ່ຄວນຮູ້ຍິ່ງ ຯລຯ ເຫຼົ່ານີ້ທໍາທີ່ຄວນເຮັດໃຫ້ແຈ້ງ

ສົ່ງຕົນໄປສູ່ເຫດເກີດ ເຫດດັບ ຄຸນ ໂທດ ແລະ ການສະລັດອອກແຫ່ງຜັດສາຍະຕະນະ ໖ ຯລຯ ອຸປາທານຂັນ ໕ ຯລຯ ສົ່ງຕົນໄປສູ່ເຫດເກີດ ເຫດດັບ ຄຸນ ໂທດແລະການສະລັດອອກແຫ່ງ ມະຫາພູຕະຮູບ ໔

ສົ່ງຕົນໄປວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທໍາມະດາ ສິ່ງນັ້ນທັງໝົດລ້ວນມີ ຄວາມດັບໄປເປັນທໍາມະດາ ລວມຄວາມວ່າ ອົບຮົມຕົນຢູ່

ຄຳວ່າ ພິກຂຸ ໄດ້ແກ່ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ພິກຂຸຜູ້ເປັນພຣະເສຂະ ລວມຄວາມວ່າ ພິກຂຸອົບຮົມຕົນຢູ່ ດ້ວຍເຫດນັ້ນ ພຣະສາຣີບຸດເຖຣະຈຶ່ງກ່າວວ່າ

ພິກຂຸອົບຮົມຕົນຢູ່ ເພິ່ງມີແນວທາງແຫ່ງຄຳເວົ້າແນວໃດ
ເພິ່ງມີໂຄຈອນໃນສາດສະໜານີ້ແນວໃດ ເພິ່ງມີສິນ ແລະ ຂໍ້ວັດແນວໃດ

[໑໙໗] (ພຣະສາຣີບຸດເຖຣະທູນຖາມວ່າ)

ພິກຂຸນັ້ນເພິ່ງສະມາທານສິກຂາອັນໃດ
ຈຶ່ງມີສະມາທິເປັນທຳເອກຜຸດຂຶ້ນ
ມີປັນຍາຮັກສາຕົນ ມີສະຕິກຳຈັດມົນທິນຂອງຕົນໄດ້
ເໝືອນຊ່າງຄຳກຳຈັດມົນທິນແຫ່ງຄຳ ສັນນັ້ນ

## ວ່າດ້ວຍການສະມາທານສິກຂາ ๓

ຄຳວ່າ ພິກຂຸນັ້ນເພິ່ງສະມາທານສິກຂາອັນໃດ ອະທິບາຍວ່າ ພິກຂຸນັ້ນຖືເອົາ ສະມາທານ ຄື ຍຶດຖື ຮັບເອົາ ຖື ຍຶດໝັ້ນ ຖືໝັ້ນສິກຂາອັນໃດ ລວມຄວາມວ່າ ພິກຂຸນັ້ນເພິ່ງ ສະມາທານສິກຂາອັນໃດ

ຄຳວ່າ ມີສະມາທິເປັນທຳເອກຜຸດຂຶ້ນ ໃນຄຳວ່າ ຈຶ່ງມີສະມາທິເປັນທຳເອກຜຸດຂຶ້ນ ມີປັນຍາຮັກສາຕົນ ມີສະຕິ ໄດ້ແກ່ ມີຈິດມີອາລົມເປັນໜຶ່ງດຽວ ມີຈິດບໍ່ຟຸ້ງຊ່ານ ມີໃຈ ບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ

ຄຳວ່າ ມີປັນຍາຮັກສາຕົນ ໄດ້ແກ່ ມີປັນຍາຮັກສາຕົນ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຮູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ๔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
๒. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
๓. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
๔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ

ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ມີສະຕິ ລວມຄວາມວ່າ ມີສະຕິ

ພຣະສາຣີບຸດເຖຣະທູນຖາມເຖິງອະທິສີລະສິກຂາວ່າ ພິກຂຸນັ້ນເພິ່ງສະມາທານສິກຂາອັນໃດ ທູນຖາມເຖິງອະທິຈິດຕະສິກຂາວ່າ ມີສະມາທິເປັນທຳເອກຜຸດຂຶ້ນ ທູນຖາມເຖິງອະທິປັນຍາສິກຂາວ່າ ມີປັນຍາຮັກສາຕົນ ທູນຖາມເຖິງຄວາມບໍລິສຸດແຫ່ງສະຕິວ່າ ຜູ້ມີສະຕິ ລວມຄວາມວ່າ ພິກຂຸນັ້ນເພິ່ງສະມາທານສິກຂາອັນໃດ ຈຶ່ງມີສະມາທິເປັນທຳເອກຜຸດຂຶ້ນ ມີປັນຍາຮັກສາຕົນ ມີສະຕິ

## ວ່າດ້ວຍການກຳຈັດມົນທິນ

ຄຳວ່າ ກຳຈັດມົນທິນຂອງຕົນໄດ້ ເໝືອນຊ່າງຄຳກຳຈັດມົນທິນຄຳ ສັນນັ້ນ ອະທິບາຍວ່າ ຄົນເຮັດຄຳ ຕັດຮຽກວ່າ ຊ່າງຄຳ ຄຳ ຕັດຮຽກວ່າ ຄຳ ຊ່າງຄຳ ຍ່ອມເປົ່າ ໄລ່ ກຳຈັດມົນທິນຄຳທັງຫຍາບ ປານກາງ ແລະ ລະອຽດ ສັນໃດ ພິກຂຸຍ່ອມເປົ່າ ໄລ່ ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດທັງຫຍາບ ປານກາງ ແລະ ລະອຽດ ສັນນັ້ນຄືກັນ

ອີກໄນໜຶ່ງ ພິກຂຸຍ່ອມເປົ່າ ໄລ່ ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງມົນທິນ ຄື ຣາຄະ ໂທສະ ໂມຫະ ມານະ ທິດຖິ ກິເລດ ທຸດຈະຣິດ ເຊິ່ງເຮັດໃຫ້ເປັນຄົນຕາບອດ ເຮັດໃຫ້ບໍ່ມີຈັກຂຸ ເຮັດໃຫ້ບໍ່ມີຍານ ອັນດັບປັນຍາ ເປັນໄປໃນຝັກຝ່າຍແຫ່ງຄວາມລຳບາກ ບໍ່ເປັນໄປເພື່ອນິບພານ

ອີກໄນໜຶ່ງ ພິກຂຸຍ່ອມເປົ່າ ໄລ່ ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງມິດສາທິດຖິ ດ້ວຍສຳມາທິດຖິ

ຍ່ອມເປົ່າ ໄລ່ ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງມິດສາສັງກັບປະ ດ້ວຍສຳມາສັງກັບປະ

ฯລฯ ມິດສາວາຈາ ດ້ວຍສຳມາວາຈາ
ฯລฯ ມິດສາກຳມັນຕະ ດ້ວຍສຳມາກຳມັນຕະ
ฯລฯ ມິດສາອາຊີວະ ດ້ວຍສຳມາອາຊີວະ
ฯລฯ ມິດສາວາຍາມະ ດ້ວຍສຳມາວາຍາມະ
ฯລฯ ມິດສາສະຕິ ດ້ວຍສຳມາສະຕິ
ฯລฯ ມິດສາສະມາທິ ດ້ວຍສຳມາສະມາທິ
ฯລฯ ມິດສາຍານະ ດ້ວຍສຳມາຍານະ

ຍ່ອມເປົ່າ ໄລ່ ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງມິດສາວິມຸດຕິ ດ້ວຍສຳມາວິມຸດຕິ

ອີກໄນໜຶ່ງ ພິກຂຸຍ່ອມເປົ່າ ໄລ່ ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດທຸກຊະນິດ ທຸດຈະຣິດທຸກທາງ ຄວາມກະວົນກະວາຍທຸກຢ່າງ ຄວາມຮ້ອນຮົນທຸກສະຖານ ຄວາມເດືອດຮ້ອນທຸກປະການ ອະກຸສະລາພິສັງຂານທຸກປະເພດ ດ້ວຍອະຣິຍະມັກມີອົງ ໘ ລວມຄວາມວ່າ ກຳຈັດມົນທິນຂອງຕົນໄດ້ ເໝືອນຊ່າງຄຳກຳຈັດມົນທິນຄຳ ສັນນັ້ນ ດ້ວຍເຫດນັ້ນ ພຣະສາຣີບຸດເຖຣະຈຶ່ງທູນຖາມວ່າ

ພິກຂຸນັ້ນເພິ່ງສະມາທານສິກຂາອັນໃດ
ຈຶ່ງມີສະມາທິເປັນທຳເອກຜຸດຂຶ້ນ
ມີປັນຍາຮັກສາຕົນ ມີສະຕິກຳຈັດມົນທິນຂອງຕົນໄດ້
ເໝືອນຊ່າງຄຳກຳຈັດມົນທິນແຫ່ງທອງ ສັນນັ້ນ

[໑໙໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສາຣີບຸດ)

ເຮົາຈັກບອກຄວາມຜາສຸກ ແລະ ທຳອັນສົມຄວນນັ້ນ
ຂອງຜູ້ເບື່ອໜ່າຍ ໃຊ້ສອຍບ່ອນນັ່ງບ່ອນນອນອັນສະຫງັດ
ຜູ້ປາຖະໜາສຳໂພທິຍານ ແກ່ທ່ານ ຕາມທີ່ຮູ້

ຄຳວ່າ ຂອງຜູ້ເບື່ອໜ່າຍ ໃນຄຳວ່າ ຄວາມຜາສຸກ ຯລຯ ຂອງຜູ້ເບື່ອໜ່າຍ ອະທິບາຍວ່າ ຜູ້ເບື່ອໜ່າຍ ຄື ອຶດອັດ ຣະອາດ້ວຍຊາດ ຯລຯ ຊະຣາ ຯລຯ ພະຍາທິ ຯລຯ ມໍຣະນະ ຯລຯ ໂສກະ ຯລຯ ປະຣິເທວະ ຯລຯ ທຸກຂະ ຯລຯ ໂທມະນັດ ຯລຯ ອຸປາຍາສະ ຯລຯ ດ້ວຍຄວາມທຸກຍ້ອນທິດຖິວິບັດ ລວມຄວາມວ່າ ຂອງຜູ້ເບື່ອໜ່າຍ

ຄຳວ່າ ຄວາມຜາສຸກ ອະທິບາຍວ່າ ເຮົາຈັກບອກຄວາມຜາສຸກ ຄື ຄວາມຢູ່ຜາສຸກ

ຄວາມຢູ່ຜາສຸກ ເປັນແນວໃດ? ຄືການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ຄາດເຄື່ອນ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມ ອິນຊີທັງ ໖ (ຕາ ຫູ ດັງ ລີ້ນ ກາຍ ໃຈ) ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນິບພານ ແລະ ປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ນີ້ຊື່ວ່າຄວາມຢູ່ຜາສຸກ ລວມຄວາມວ່າ ຄວາມຜາສຸກ ຯລຯ ຂອງຜູ້ເບື່ອໜ່າຍ

## ອະທິບາຍຄຳວ່າ ພະຄະວາ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ສາຣີບຸດ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພຣະເຖຣະນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄຳກ່າວໂດຍຄວາມເຄົາຣົບ

ອີກໄນໜຶ່ງ ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍຣາຄະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂທສະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂມຫະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍມານະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍທິດຖິໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍສ້ຽນໜາມໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍກິເລດໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງຈຳແນກ ແຍກແຍະ ແຈກແຈງທຳຣັດຕະນະ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງເຮັດບ່ອນສຸດແຫ່ງພົບໄດ້

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມພຣະວໍຣະກາຍແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມສີນ ອົບຮົມຈິດ ອົບຮົມປັນຍາແລ້ວ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ສອຍເສນາສະນະທີ່ເປັນປ່າເລົ່າ ແລະ ປ່າທຶບອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມີສ່ວນແຫ່ງຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງອັດຖະຣົດ ທຳມະຣົດ ວິມຸດຕິຣົດ ອະທິສີນ ອະທິຈິດ ອະທິປັນຍາ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຊານ ໔ ອັບປະມັນຍາ ໔ ອະຣູບສະມາບັດ ໔ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງວິໂມກ ໘ ອະພິພາຍະຕະນະ ໘ ອະນຸປຸບພະວິຫາຣະສະມາບັດ ໙ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສັນຍາພາວະນາ ໑໐ ກະສິນສະມາບັດ ໑໐ ອານາປານະສະຕິສະມາທິ ອະສຸພະສະມາບັດ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊຶ່ງເປັນຜູ້ມີສ່ວນແຫ່ງສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ຊຶ່ງເປັນຜູ້ມີສ່ວນແຫ່ງຕະຖາຄະຕະພະລະຍານ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ພຣະນາມວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງ ບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດ ແລະອຳມາດຕັ້ງ ບໍ່ແມ່ນພຣະຍາດພີ່ນ້ອງ ແລະ ຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນວິໂມກຂັນຕິກະນາມ ເປັນສັດສິກາບັນຍັດຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ພ້ອມກັບການບັນລຸພຣະສັບພັນຍຸຕະຍານ ທີ່ເຫງົ້າຕົ້ນໂພລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ສາຣີບຸດ

ຄຳວ່າ ໃຊ້ສອຍບ່ອນນັ່ງບ່ອນນອນອັນສະຫງັດ ອະທິບາຍວ່າ ບ່ອນສຳລັບນັ່ງ ຕັດຮຽກວ່າ ບ່ອນນັ່ງ ໄດ້ແກ່ ຕຽງ ຕັ່ງ ເບາະ ເສື່ອ ແຜ່ນໜັງ ເຄື່ອງປູລາດເຮັດດ້ວຍຫຍ້າ ເຄື່ອງປູລາດ ເຮັດດ້ວຍໃບໄມ້ ເຄື່ອງປູລາດເຮັດດ້ວຍເຟືອງ

ເສນາສະນະ ຕັດຮຽກວ່າ ບ່ອນນອນ ໄດ້ແກ່ ວິຫານ ເຮືອນຫຼັງຄາດ້ານດຽວ ຜາສາດເຮືອນໂລ້ນ ຖ້ຳ ບ່ອນນອນ ແລະ ບ່ອນນັ່ງນັ້ນ ສະຫງັດ ຄື ວ່າງ ງຽບ ຈາກການໄດ້ເຫັນຮູບບໍ່ເປັນທີ່ສະບາຍ ຯລຯ ຈາກການໄດ້ຍິນສຽງບໍ່ເປັນທີ່ສະບາຍ ສະຫງັດ ຄື ວ່າງ ງຽບ ຈາກການມະຄຸນ ໕ ບໍ່ເປັນທີ່ສະບາຍ ຜູ້ໃຊ້ສອຍ ຄື ເສບເປັນນິດ ຊ້ອງເສບ ເສບສະເພາະບ່ອນນອນບ່ອນນັ່ງນັ້ນ ລວມຄວາມວ່າ ໃຊ້ສອຍບ່ອນນັ່ງບ່ອນນອນອັນສະຫງັດ

ຄຳວ່າ ທຳອັນສົມຄວນ ຯລຯ ຜູ້ປາຖະໜາສຳໂພທິຍານ ອະທິບາຍວ່າ ຍານໃນມັກ ທັງ ໔ ຕັດຮຽກວ່າ ສຳໂພທິຍານ ຄື ປັນຍາ ປັນຍິນຊີ ປັນຍາພະລະ ຯລຯ ທຳມະວິຈະຍະສຳໂພດຊົງ ປັນຍາເຄື່ອງພິຈາລະນາ ປັນຍາເຄື່ອງເຫັນແຈ້ງ ສຳມາທິດຖິ ຜູ້ປາຖະໜາຈະຮູ້ ປາຖະໜາຈະຮູ້ຕາມ ປາຖະໜາຈະຮູ້ສະເພາະ ປາຖະໜາຈະຮູ້ພ້ອມ ປາຖະໜາຈະບັນລຸ ປາຖະໜາຈະສຳຜັດ ປາຖະໜາຈະເຮັດໃຫ້ແຈ້ງສຳໂພທິຍາຍນັ້ນ ລວມຄວາມວ່າ ຜູ້ປາຖະໜາສຳໂພທິຍານ

ຄຳວ່າ ທຳອັນສົມຄວນ ອະທິບາຍວ່າ

ທຳອັນສົມຄວນແກ່ໂພທິຍານ ເປັນແນວໃດ?

ຄື ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ຄາດເຄື່ອນ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ ຄວາມເປັນຜູ້ຮູ້ຈັກປະມານໃນການ

ບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ເຫຼົ່ານີ້ ຕັດຮຽກວ່າ ທຳອັນສົມຄວນແກ່ໂພທິຍານ

ອີກໄນໜຶ່ງ ວິປັດສະນາໃນສ່ວນເບື້ອງຕົ້ນແຫ່ງມັກທັງ ໔ ເຫຼົ່ານີ້ ຕັດຮຽກວ່າ ທຳອັນສົມຄວນແກ່ໂພທິຍານ ລວມຄວາມວ່າ ທຳອັນສົມຄວນ ໆລໆ ຜູ້ປາຖະໜາ ສຳໂພທິຍານ

ຄຳວ່າ ນັ້ນ ໃນຄຳວ່າ ເຮົາຈັກບອກ ໆລໆ ນັ້ນ ແກ່ທ່ານ ຕາມທີ່ຮູ້ ໄດ້ແກ່ ທຳອັນສົມຄວນແກ່ໂພທິຍານ

ຄຳວ່າ ເຮົາຈັກບອກ ໄດ້ແກ່ ຈັກເວົ້າ ບອກ ຄື ກ່າວ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ

ຄຳວ່າ ຕາມທີ່ຮູ້ ໄດ້ແກ່ ຕາມທີ່ຮູ້ ຄື ຕາມທີ່ຮູ້ ຮູ້ທົ່ວ ຮູ້ແຈ່ມແຈ້ງ ຮູ້ສະເພາະ ແທງຕະຫຼອດ ໄດ້ແກ່ ເຮົາຈັກບອກທຳທີ່ຮູ້ດ້ວຍຕົນເອງ ທຳທີ່ປະຈັກແກ່ຕົນເອງ ບໍ່ແມ່ນໂດຍອາການເຊື່ອຜູ້ອື່ນວ່າ ທຳນີ້ເປັນດັ່ງນີ້ ທຳນີ້ເປັນດັ່ງນີ້ ບໍ່ແມ່ນໂດຍການເລົ່າລື ບໍ່ແມ່ນໂດຍການຖືສືບ ໆ ກັນມາ ບໍ່ແມ່ນໂດຍການອ້າງຕຳລາ ບໍ່ແມ່ນໂດຍຕັກກະ ບໍ່ແມ່ນໂດຍການ ອະນຸມານ ບໍ່ແມ່ນໂດຍການຄິດຕອງຕາມແນວເຫດຜົນ ບໍ່ແມ່ນຍ້ອນເຂົ້າໄດ້ກັບທິດສະດີທີ່ ພິນິດໄວ້ແລ້ວ ຈັກບອກທຳທີ່ຮູ້ສະເພາະຕົນເອງ ທຳທີ່ປະຈັກແກ່ຕົນເອງ ລວມຄວາມວ່າ ເຮົາຈັກບອກ ໆລໆ ນັ້ນ ແກ່ທ່ານ ຕາມທີ່ຮູ້ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສາຣີບຸດ)

ເຮົາຈັກບອກຄວາມຜາສຸກ ແລະ ທຳອັນສົມຄວນນັ້ນ
ຂອງຜູ້ເບື່ອໜ່າຍ ໃຊ້ສອຍບ່ອນນັ່ງບ່ອນນອນອັນສະຫງັດ
ຜູ້ປາຖະໜາສຳໂພທິຍານ ແກ່ທ່ານ ຕາມທີ່ຮູ້

[໑໘໙] (ພຣະຜູ້ມີພຣະພາກເຈົ້າຕັດຕໍ່ໄປວ່າ)

ພິກຂຸຜູ້ເປັນນັກປາດ ມີສະຕິ
ປະພຶດທຳອັນເປັນສ່ວນສຸດຮອບ
ບໍ່ເພິ່ງຢ້ານໄພ ໕ ຢ່າງ ຄື
ເຫຼືອດ ສັດໄຕ່ຕອມ ສັດເລືອຄານ
ສຳຜັດຈາກມະນຸດ ແລະ ສັດ ໔ ຕີນ

## ວ່າດ້ວຍພິກຂຸຜູ້ເປັນນັກປາດ

ຄຳວ່າ ຜູ້ເປັນນັກປາດ ໃນຄຳວ່າ ຜູ້ເປັນນັກປາດ ຯລຯ ບໍ່ເພິ່ງຢ້ານໄພ ໕ ຢ່າງ ໄດ້ແກ່ ເປັນນັກປາດ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ສະຫລຽວສະຫຼາດ ບໍ່ເພິ່ງຢ້ານ ຄື ບໍ່ເພິ່ງຫວາດສຽວ ບໍ່ເພິ່ງເກງກົວ ບໍ່ເພິ່ງຫວາດກົວ ບໍ່ເພິ່ງຢ້ານກົວ ບໍ່ເພິ່ງເຖິງຄວາມສະດຸ້ງ ຕໍ່ໄພ ໕ ຢ່າງ ໄດ້ແກ່ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ເພິ່ງເປັນຜູ້ລະໄພ ແລະ ຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງຫົວຢູ່ ລວມຄວາມວ່າ ຜູ້ເປັນນັກປາດ ຯລຯ ບໍ່ເພິ່ງຢ້ານໄພ ໕ ຢ່າງ

ຄຳວ່າ ພິກຂຸ ໃນຄຳວ່າ ພິກຂຸ ຯລຯ ມີສະຕິ ປະພຶດທຳອັນເປັນສ່ວນສຸດຮອບ ໄດ້ແກ່ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ພິກຂຸຜູ້ເປັນພຣະເສຂະ

ຄຳວ່າ ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
໒. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
໓. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
໔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ

ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ມີສະຕິ ລວມຄວາມວ່າ ມີສະຕິ

ຄຳວ່າ ປະພຶດທຳອັນເປັນສ່ວນສຸດຮອບ ໄດ້ແກ່ ທຳອັນເປັນສ່ວນສຸດຮອບ ໔ ປະການ ຄື

໑. ທຳອັນເປັນສ່ວນສຸດຮອບ ຄື ສີນສັງວອນ
໒. ທຳອັນເປັນສ່ວນສຸດຮອບ ຄື ອິນຊີສັງວອນ
໓. ທຳອັນເປັນສ່ວນສຸດຮອບ ຄື ໂພຊະເນມັດຕັນຍຸຕາ
໔. ທຳອັນເປັນສ່ວນສຸດຮອບ ຄື ຊາຄະຣິຍານຸໂຍຄ

ທຳອັນເປັນສ່ວນສຸດຮອບ ຄື ສີນສັງວອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ສົມບູນດ້ວຍອາຈາຣະ ແລະໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາຢູ່ໃນ ສິກຂາບົດທັງຫຼາຍ ພິຈາລະນາເຫັນຄວາມເນົ່າເສຍພາຍໃນ ປະພຶດທຳອັນເປັນສ່ວນ ສຸດຮອບ ຄືສີນສັງວອນພາຍໃນ ບໍ່ທຳລາຍກົດເກນ ນີ້ຊື່ວ່າທຳອັນເປັນສ່ວນສຸດຮອບຄືສີນສັງວອນ

ທຳອັນເປັນສ່ວນສຸດຮອບ ຄື ອິນຊີສັງວອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວ ບໍ່ລວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມຈັກຂຸນຊີ ເຊິ່ງເມື່ອສັງລວມຢູ່ດ້ວຍດີແລ້ວ ຈະເປັນເຫດໃຫ້ບາບອະກຸສົນທຳ ຄືອະພິດຊາ ແລະໂທມະນັດຄອບງຳບໍ່ໄດ້ ຍ່ອມຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ກໍບໍ່ລວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອຄວາມສັງລວມໃນມະນິນຊີ ເຊິ່ງເມື່ອສັງລວມຢູ່ດ້ວຍດີແລ້ວ ຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳບໍ່ໄດ້ ຍ່ອມຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິຈາລະນາອາທິດຕະປະຣິຍາຍະເທດສະໜາຢູ່ ປະພຶດທຳອັນເປັນສ່ວນສຸດຮອບ ຄື ອິນຊີສັງວອນພາຍໃນ ບໍ່ທຳລາຍເຂດແດນ ນີ້ ຊື່ວ່າທຳອັນເປັນສ່ວນສຸດຮອບ ຄື ອິນຊີສັງວອນ

ທຳອັນເປັນສ່ວນສຸດຮອບ ຄື ໂພຊະເນມັດຕັຍຍຸຕາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວ ຈຶ່ງສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອຕົບແຕ່ງ ບໍ່ແມ່ນເພື່ອປະດັບ ແຕ່ສັນພຽງເພື່ອໃຫ້ຮ່າງກາຍນີ້ດຳຣົງຢູ່ ເພື່ອໃຫ້ຮ່າງກາຍນີ້ດຳເນີນໄປໄດ້ ເພື່ອຣະງັບຄວາມລຳບາກ ເພື່ອອະນຸເຄາະພົມມະຈັນຢ່າງດຽວເທົ່ານັ້ນ ດ້ວຍມະນະສິການວ່າ ເຮົາຈັກບຳບັດເວທະນາເກົ່າ ບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ການດຳເນີນຊີວິດຂອງເຮົາ ຄວາມບໍ່ມີໂທດ ແລະ ຄວາມຢູ່ສະບາຍຈັກມີໄດ້ດ້ວຍວິທີການແນວນີ້ ພິຈາລະນາອາຫານປຽບກັບນ້ຳມັນສຳລັບຍອດເພົາ ຜ້າອັດປາກບາດ ແລະ ຊີ້ນຂອງບຸດ ປະພຶດທຳອັນເປັນສ່ວນສຸດຮອບ ຄື ໂພຊະເນມັດຕັຍຍຸຕາພາຍໃນ ບໍ່ທຳລາຍເຂດແດນ ນີ້ຊື່ວ່າທຳອັນເປັນສ່ວນສຸດຮອບ ຄື ໂພຊະເນມັດຕັຍຍຸຕາ

ທຳອັນເປັນສ່ວນສຸດຮອບຄືຊາຄະຣິຍານຸໂຍກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມ ແລະ ການນັ່ງຕະຫຼອດວັນ  ຄື ຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມ ແລະ ການນັ່ງຕະຫຼອດປະຖົມຍາມແຫ່ງຣາຕີ ສຳເລັດການນອນຢ່າງຣາດຊະສີ ໂດຍຕະແຄງດ້ານຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ກຳນົດເວລາຕື່ນໄວ້ໃນໃຈ ຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນ ຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມ ແລະ ການນັ່ງຕະຫຼອດປັດສິມຍາມແຫ່ງຣາຕີ ພິຈາລະນາເຖິງຄວາມເປັນຢູ່ຂອງຜູ້ມີຣາຕີດຽວຈະເລີນ ປະພຶດທຳເປັນສ່ວນສຸດຮອບ ຄື ຊາຄະຣິຍານຸໂຍກພາຍໃນ ບໍ່ທຳລາຍເຂດແດນ ນີ້ຊື່ວ່າທຳອັນເປັນສ່ວນສຸດຮອບ ຄື ຊາຄະຣິຍານຸໂຍກ ລວມຄວາມວ່າ ພິກຂຸ ຯລຯ ມີສະຕິ ປະພຶດ ທຳອັນເປັນສ່ວນສຸດຮອບ

ຄຳວ່າ ເຫຼືອດ ສັດໄຕ່ຕອມ ສັດເລືອຄານ ອະທິບາຍວ່າ ແມງຕາເຫຼືອງ ຕັດ ຮຽກວ່າເຫຼືອດ ແມງວັນທຸກຂະນິດ ຕັດຮຽກວ່າ  ສັດໄຕ່ຕອມ ຍ້ອນເຫດໃດ ແມງວັນ  ທຸກຂະນິດ ຈຶ່ງຕັດຮຽກວ່າ

ສັດໄຕ່ຕອມ ແມງວັນເຫຼົ່ານັ້ນ ບິນຊອນໄຊ ຍ້ອນເຫດນັ້ນ ແມງວັນທຸກຊະນິດ ຈຶ່ງຕັດຮຽກວ່າ ສັດໄຕ່ຕອມ ງູຕັດຮຽກວ່າ ສັດເລືອຄານ ລວມຄວາມວ່າ ເຫຼືອດ ສັດໄຕ່ຕອມ ສັດເລືອຄານ

ຄຳວ່າ ສຳຜັດຈາກມະນຸດ ແລະ ສັດ ໔ ຕີນ ອະທິບາຍວ່າ ໂຈນ ຄົນທີ່ກໍ່ກຳໄວ້ ຫຼືຍັງບໍ່ໄດ້ກໍ່ກຳໄວ້ ຕັດຮຽກວ່າ ສຳຜັດຈາກມະນຸດ

ຊົນເຫຼົ່ານັ້ນ ເພິ່ງຖາມບັນຫາກັບພິກຂຸແດ່ ຍົກເລື້ອງຂຶ້ນດ່າ ບໍຣິພາດ ແຊ່ງ ສຽດສີ ບຽດບຽນ ຂົ່ມເຫງ ກົດຂີ່ ຍ່ຳຍີ ຂ້າ ເຂັ່ນຂ້າ ຫຼື ທຳການເຂັ່ນຂ້າແດ່ ຄວາມເຂົ້າໄປບຽດບຽນຈາກມະນຸດຊະນິດໃດກໍຕາມ ຊື່ວ່າ ສຳຜັດຈາກມະນຸດ

ຄຳວ່າ ສັດ ໔ ຕີນ ໄດ້ແກ່ ສິງ ເສືອໂຄ່ງ ເສືອເຫຼືອງ ໝີ ເສືອດາວ ໝາປ່າ ງົວ ກະບືຊ້າງ ສັດເຫຼົ່ານັ້ນ ເພິ່ງຍ່ຳຍີແດ່ ກັດກິນ ບຽດບຽນ ຂົ່ມເຫງ ກົດຂີ່ ຍ່ຳຍີ ຂ້າ ເຂົ້າໄປຂ້າ ຫຼື ທຳການເຂົ້າໄປຂ້າພິກຂຸແດ່ ໄພຈາກສັດ ໔ ຕີນ ຊະນິດໃດກໍຕາມ ຊື່ວ່າ ການເຂົ້າໄປຂ້າຈາກສັດ ໔ ຕີນ ລວມຄວາມວ່າ ສຳຜັດຈາກມະນຸດ ແລະ ສັດ ໔ ຕີນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸຜູ້ເປັນນັກປາດ ມີສະຕິ
ປະພຶດທຳອັນເປັນສ່ວນສຸດຮອບ
ບໍ່ເພິ່ງຢ້ານໄພ ໕ ຢ່າງ ຄື
ເຫຼືອດ ສັດໄຕ່ຕອມ ສັດເລືອຄານ
ສຳຜັດຈາກມະນຸດ ແລະ ສັດ ໔ ຕີນ

[໔໐໐] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງຢ້ານກົວຜູ້ຖືທຳອື່ນ
ແມ່ນເຫັນອາລົມໜ້າຫວາດສຽວຫຼວງຫຼາຍ
ຂອງຜູ້ຖືທຳອື່ນເຫຼົ່ານັ້ນ ກໍບໍ່ເພິ່ງຢ້ານກົວ
ອັນໜຶ່ງ ພິກຂຸຜູ້ໝັ່ນສະແຫວງຫາກຸສົນ ເພິ່ງປາບປາມອັນຕະລາຍອື່ນ ໆ

## ວ່າດ້ວຍສະຫະທຳມິກ

ຄຳວ່າ ພິກຂຸບໍ່ເພິ່ງຢ້ານກົວຜູ້ຖືທຳອື່ນ ແມ່ນເຫັນອາລົມໜ້າຫວາດສຽວຫຼວງຫຼາຍຂອງຜູ້ຖືທຳອື່ນເຫຼົ່ານັ້ນ ອະທິບາຍວ່າ ເວັ້ນສະຫະທຳມິກ ກ ຈຳພວກ ຊົນເຫຼົ່າໃດກໍຕາມທີ່ບໍ່ໄດ້ເຫຼື້ອມໃສໃນພຣະພຸດທະເຈົ້າ ພຣະທຳ ພຣະສົງ ຕັດຮຽກວ່າ ຜູ້ຖືທຳອື່ນ ຊົນເຫຼົ່ານັ້ນເພິ່ງຖາມບັນຫາກັບພິກຂຸແດ່ ເພິ່ງຍົກເລື້ອງຂຶ້ນດ່າ ບໍຣິພາດ ແຊ່ງ ສຽດສີ ບຽດບຽນ ຂົ່ມເຫງ ກົດຂີ່ ຍ່ຳຍີ ຂ້າ

ເຂັ່ນຂ້າ ຫຼື ທຳການເຂັ່ນຂ້າ ພິກຂຸໄດ້ເຫັນ ຫຼືໄດ້ຍິນອາລົມອັນໜ້າຫວາດສຽວຫຼວງຫຼາຍຂອງຊົນຜູ້ຖືທຳອື່ນເຫຼົ່ານັ້ນແລ້ວ ບໍ່ເພິ່ງ ຫວັ່ນໄຫວ ບໍ່ເພິ່ງສັ່ນເຊນ ບໍ່ເພິ່ງກະສັບກະສ່າຍ ບໍ່ເພິ່ງຫວາດສຽວ ບໍ່ເພິ່ງສະດຸ້ງ ບໍ່ເພິ່ງເກງກົວ ບໍ່ເພິ່ງຫວາດກົວ ບໍ່ເພິ່ງຢ້ານກົວ ບໍ່ເພິ່ງເຖິງຄວາມສະດຸ້ງ ໄດ້ແກ່ ເພິ່ງເປັນຜູ້ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ເພິ່ງເປັນຜູ້ລະໄພ ແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຍອງເກົ້າຢູ່ ລວມຄວາມວ່າ ພິກຂຸບໍ່ເພິ່ງຢ້ານກົວຜູ້ຖືທຳອື່ນ ແມ່ນເຫັນອາລົມໜ້າຫວາດສຽວຫຼວງຫຼາຍຂອງຜູ້ຖືທຳອື່ນເຫຼົ່ານັ້ນ

ຄຳວ່າ ອັນໜຶ່ງ ພິກຂຸຜູ້ໝັ່ນສະແຫວງຫາກຸສົນ ເພິ່ງປາບປາມອັນຕະລາຍອື່ນ ໆ ອະທິບາຍວ່າ ອັນໜຶ່ງ ຍັງມີອັນຕະລາຍອື່ນ ໆ ທີ່ພິກຂຸເພິ່ງປາບປາມຄອບງຳ ກຳຈັດ ຂັບໄລ່ຍ່ຳຍີຢູ່ອີກ

ຄຳວ່າ ອັນຕະລາຍ ໄດ້ແກ່ ອັນຕະລາຍ ໒ ຢ່າງ ຄື (໑) ອັນຕະລາຍທີ່ຜາກົດ (໒) ອັນຕະລາຍທີ່ບໍ່ຜາກົດ ຯລຯ ຊື່ວ່າ ອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບແນວນີ້ແດ່

ຄຳວ່າ ພິກຂຸຜູ້ໝັ່ນສະແຫວງຫາກຸສົນ ອະທິບາຍວ່າ ພິກຂຸຜູ້ສະແຫວງຫາ ຄື ເສາະຫາຄົ້ນຫາການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ຜິດ ການປະຕິບັດທີ່ເອື້ອປະໂຫຍດ ຯລຯ ອະຣິຍະມັກມີອົງ ໘ ນິບພານ ແລະ ປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ເພິ່ງປາບປາມ ຄອບງຳ ກຳຈັດ ຂັບໄລ່ ຍ່ຳຍີອັນຕະລາຍ ລວມຄວາມວ່າ ອັນໜຶ່ງ ພິກຂຸຜູ້ໝັ່ນສະແຫວງຫາກຸສົນ ເພິ່ງປາບປາມອັນຕະລາຍອື່ນ ໆ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງຢ້ານກົວຜູ້ຖືທຳອື່ນ
ແມ່ນເຫັນອາລົມໜ້າຫວາດສຽວຫຼວງຫຼາຍ
ຂອງຜູ້ຖືທຳອື່ນເຫຼົ່ານັ້ນ ກໍບໍ່ເພິ່ງຢ້ານກົວ
ອັນໜຶ່ງ ພິກຂຸຜູ້ໝັ່ນສະແຫວງຫາກຸສົນ ເພິ່ງປາບປາມອັນຕະລາຍອື່ນ ໆ

[໒໐໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸຖືກຜັດສະແຫ່ງຄວາມເຈັບປ່ວຍ ແລະ ຄວາມຫິວກະທົບແລ້ວ
ເພິ່ງອົດກັ້ນຄວາມໜາວ ຫຼື ຄວາມຮ້ອນ
ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນກະທົບແລ້ວ ໂດຍອາການຫຼາຍຢ່າງ
ກໍບໍ່ໃຫ້ໂອກາດ ເພິ່ງທຳຄວາມພຽນ ແລະ ຄວາມສູ້ຊົນໃຫ້ໝັ້ນຄົງ

ຄຳວ່າ ພິກຂຸຖືກຜັດສະແຫ່ງຄວາມເຈັບປ່ວຍ ແລະ ຄວາມຫິວກະທົບແລ້ວ ອະທິບາຍວ່າ ຜັດສະແຫ່ງໂຣກ ຕັດຮຽກວ່າ ຜັດສະແຫ່ງຄວາມເຈັບປ່ວຍ ພິກຂຸຖືກຜັດສະແຫ່ງໂຣກກະທົບແລ້ວ ຄື ຄອບງຳ ກຸ້ມລຸມ ປະກອບແລ້ວ ໄດ້ແກ່ ຖືກໂຣກທາງຕາ ຯລຯ ໂຣກທາງຫູ ຯລຯ ໂຣກທາງດັງ ຯລຯ ໂຣກທາງລີ້ນ ຯລຯ ໂຣກທາງກາຍ ຯລຯ ຖືກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະ ສັດເລືອຄານກະທົບແລ້ວ ຄື ຄອບງຳ ກຸ້ມລຸມ ປະກອບແລ້ວ ຄວາມຢາກກິນ ຕັດ ຮຽກວ່າ ຄວາມຫິວ ພິກຂຸນັ້ນເປັນຜູ້ຖືກຄວາມຫິວກະທົບແລ້ວ ຄື ຄອບງຳ ກຸ້ມລຸມ ປະກອບແລ້ວ ລວມຄວາມວ່າ ພິກຂຸຖືກຜັດສະແຫ່ງຄວາມເຈັບປ່ວຍ ແລະ ຄວາມຫິວກະທົບແລ້ວ

## ວ່າດ້ວຍຄວາມໜາວມີດ້ວຍເຫດ ໔ ຢ່າງ

ຄຳວ່າ ຄວາມໜາວ ໃນຄຳວ່າ ເພິ່ງອົດກັ້ນຄວາມໜາວ ຫຼື ຄວາມຮ້ອນ ອະທິບາຍວ່າ ຄວາມໜາວຍ່ອມມີດ້ວຍເຫດ ໔ ຢ່າງ ຄື (໑) ຄວາມໜາວດ້ວຍອຳນາດທາດກຳເຣີບພາຍໃນ (໔) ຄວາມໜາວດ້ວຍອຳນາດລະດູພາຍນອກ

ຄຳວ່າ ຄວາມຮ້ອນ ອະທິບາຍວ່າ ຄວາມຮ້ອນຍ່ອມມີດ້ວຍເຫດ ໔ ຢ່າງ ຄື (໑) ຄວາມຮ້ອນດ້ວຍອຳນາດທາດກຳເຣີບພາຍໃນ (໔) ຄວາມຮ້ອນດ້ວຍອຳນາດລະດູພາຍນອກ ລວມຄວາມວ່າ ຄວາມໜາວ ຄວາມຮ້ອນ

ຄຳວ່າ ເພິ່ງອົດກັ້ນ ອະທິບາຍວ່າ ພິກຂຸເພິ່ງເປັນຜູ້ອົດທົນຕໍ່ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະ ສັດເລືອຄານ ເພິ່ງເປັນຜູ້ອົດກັ້ນຕໍ່ຄຳເວົ້າຊົ່ວຮ້າຍ ມຸ້ງຮ້າຍ ທຸກຂະເວທະນາທາງກາຍ ທີ່ເກີດຂຶ້ນ ກ້າ ແຂງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ພາກນຳຊີວິດໄປໄດ້ ລວມຄວາມວ່າ ເພິ່ງອົດກັ້ນຄວາມໜາວ ຫຼື ຄວາມຮ້ອນ

ຄຳວ່າ ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນ ໃນຄຳວ່າ ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນ ກະທົບແລ້ວໂດຍອາການຫຼາຍຢ່າງ ກໍບໍ່ໃຫ້ໂອກາດ ອະທິບາຍວ່າ ຖືກຜັດສະແຫ່ງຄວາມ ເຈັບປ່ວຍ ຄວາມຫິວ ຄວາມໜາວ ແລະ ຄວາມຮ້ອນກະທົບແລ້ວ ຄື ຄອບງຳ ກຸ້ມລຸມ ປະກອບແລ້ວ ລວມຄວາມວ່າ ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນກະທົບແລ້ວ

ຄຳວ່າ ໂດຍອາການຫຼາຍຢ່າງ ໄດ້ແກ່ ຖືກກະທົບແລ້ວ ຄື ຄອບງຳ ກຸ້ມລຸມ ປະກອບແລ້ວ ໂດຍອະເນກປະການ ລວມຄວາມວ່າ ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນກະທົບແລ້ວ ໂດຍອາການຫຼາຍຢ່າງ

ຄຳວ່າ ກໍບໍ່ໃຫ້ໂອກາດ ໄດ້ແກ່ ບໍ່ເປີດໂອກາດໃຫ້ວິນຍານທີ່ເກີດພ້ອມກັບອະພິສັງຂານ ຈຶ່ງຊື່ວ່າ ບໍ່ໃຫ້ໂອກາດ ແນວນີ້ແດ່

ອີກໄນໜຶ່ງ ບໍ່ເປີດໂອກາດໃຫ້ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຈຶ່ງຊື່ວ່າບໍ່ໃຫ້ໂອກາດ ແນວນີ້ແດ່ ລວມຄວາມວ່າ ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນກະທົບແລ້ວ ໂດຍອາການຫຼາຍຢ່າງ ກໍບໍ່ໃຫ້ໂອກາດ

ຄໍາວ່າ ເພິ່ງທໍາຄວາມພຽນ ແລະ ຄວາມສູ້ຊົນໃຫ້ໝັ້ນຄົງ ອະທິບາຍວ່າ ການຜາຣົບຄວາມພຽນ ການກ້າວອອກ ການກ້າວໄປຂ້າງໜ້າ ການກ້າວຂຶ້ນໄປ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຂະຫຍັນ ຄວາມບໍ່ຖອຍກັບ ຄວາມໝັ້ນຄົງ ຄວາມຊົງໄວ້ ຄວາມສູ້ຊົນບໍ່ຫຍໍ້ທໍ້ຍ່ອນ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມປະຄອງທຸຣະໄວ້ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສໍາມາວາຍາມະ ຕັດຮຽກວ່າ ຄວາມພຽນ ແລະ ຄວາມບາກບັ່ນ

ຄໍາວ່າ ເພິ່ງທໍາຄວາມພຽນ ແລະ ຄວາມສູ້ຊົນໃຫ້ໝັ້ນຄົງ ອະທິບາຍວ່າ ເພິ່ງເຮັດຄວາມພຽນ ແລະ ຄວາມສູ້ຊົນໃຫ້ໝັ້ນຄົງ ຄື ເພິ່ງເຮັດໃຫ້ໜັກແໜ້ນ ໄດ້ແກ່ ເພິ່ງເປັນຜູ້ມີ ການຖືປະຕິບັດໝັ້ນຄົງ ມີການຖືປະຕິບັດແນ່ວແນ່ ລວມຄວາມວ່າ ເພິ່ງກະທໍາຄວາມພຽນແລະຄວາມສູ້ຊົນໃຫ້ໝັ້ນຄົງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸຖືກຜັດສະແຫ່ງຄວາມເຈັບປ່ວຍ ແລະ ຄວາມຫິວກະທົບແລ້ວ
ເພິ່ງອົດກັ້ນຄວາມໜາວ ຫຼື ຄວາມຮ້ອນ
ພິກຂຸນັ້ນຖືກຜັດສະເຫຼົ່ານັ້ນກະທົບແລ້ວ ໂດຍອາການຫຼາຍຢ່າງ
ກໍບໍ່ໃຫ້ໂອກາດ ເພິ່ງທໍາຄວາມພຽນ ແລະ ຄວາມສູ້ຊົນໃຫ້ໝັ້ນຄົງ

[໔໐໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງລັກ ບໍ່ເພິ່ງເວົ້າຕົວະ
ເພິ່ງແຜ່ເມດຕາໄປສູ່ສັດທັງຜູ້ສະດຸ້ງ ແລະ ຜູ້ໝັ້ນຄົງ
ເມື່ອໃດ ພິກຂຸຮູ້ແຈ້ງຄວາມຂຸ່ນມົວແຫ່ງໃຈ
ເມື່ອນັ້ນ ທ່ານເພິ່ງບັນເທົາສາດ້ວຍມະນະສິການວ່າ
ນີ້ເປັນຝັກຝ່າຍແຫ່ງມານຜູ້ມີກໍາດໍາ

ຄໍາວ່າ ບໍ່ເພິ່ງລັກ ໃນຄໍາວ່າ ບໍ່ເພິ່ງລັກ ບໍ່ເພິ່ງເວົ້າຕົວະ ອະທິບາຍວ່າ ພິກຂຸ ໃນທໍາວິໄນນີ້ ເພິ່ງເປັນຜູ້ລະອະທິນນາທານ ເວັ້ນຂາດຈາກອະທິນນາທານ ຮັບເອົາແຕ່ຂອງທີ່ ເຂົາໃຫ້ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ດໍາຣົງຕົນຢູ່ຢ່າງສະອາດ ບໍ່ລັກ ລວມຄວາມວ່າ ບໍ່ເພິ່ງລັກ

ຄໍາວ່າ ບໍ່ເພິ່ງເວົ້າຕົວະ ອະທິບາຍວ່າ ພິກຂຸໃນທໍາວິໄນນີ້ ເພິ່ງເປັນຜູ້ລະການກ່າວຕົວະເວັ້ນຂາດຈາກການກ່າວຕົວະໄດ້ແລ້ວ ຄື ເປັນຄົນເວົ້າຈິງ ຕັ້ງໝັ້ນໃນຄວາມສັດ ມີຄໍາເວົ້າໝັ້ນຄົງເຊື່ອຖືໄດ້ ບໍ່ກ່າວຄໍາຫຼອກລວງຊາວໂລກ ລວມຄວາມວ່າ ບໍ່ເພິ່ງລັກ ບໍ່ເພິ່ງເວົ້າຕົວະ

## ວ່າດ້ວຍການແຜ່ເມດຕາ

ຄໍາວ່າ ເພິ່ງແຜ່ເມດຕາໄປສູ່ສັດທັງຜູ້ສະດຸ້ງແລະຜູ້ໝັ້ນຄົງ ອະທິບາຍວ່າ

ຄຳວ່າ ເມດຕາ ໄດ້ແກ່ ຄວາມຮັກ ກິຣິຍາທີ່ຮັກ ພາວະທີ່ຮັກ ຄວາມອີດູ ກິຣິຍາທີ່ອີດູ ພາວະທີ່ອີດູ ຄວາມປາຖະໜາເກື້ອກູນກັນ ຄວາມອະນຸເຄາະ ຄວາມບໍ່ພະຍາບາດ ຄວາມບໍ່ປອງຮ້າຍ ກຸສົນມູນ ຄື ອະໂທສະໃນໝູ່ສັດ

ຄຳວ່າ ຜູ້ສະດຸ້ງ ອະທິບາຍວ່າ ເຫຼົ່າສັດຍັງລະຕັນຫາອັນເຮັດໃຫ້ສະດຸ້ງຕົກໃຈບໍ່ໄດ້ ຍັງລະໄພ ແລະ ຄວາມຢ້ານກົວບໍ່ໄດ້

ຍ້ອນເຫດໃດ? ສັດເຫຼົ່ານັ້ນ ຈຶ່ງຕັດຮຽກວ່າ ຜູ້ສະດຸ້ງ

ສັດເຫຼົ່ານັ້ນ ຍັງສະດຸ້ງ ຄື ເກງກົວ ຫວາດກົວ ຢ້ານກົວ ເຖິງຄວາມສະດຸ້ງ ຍ້ອນເຫດນັ້ນ ສັດເຫຼົ່ານັ້ນ ຈຶ່ງຕັດຮຽກວ່າ ຜູ້ສະດຸ້ງ

ຄຳວ່າ ຜູ້ໝັ້ນຄົງ ອະທິບາຍວ່າ ເຫຼົ່າສັດທີ່ລະຕັນຫາອັນເຮັດໃຫ້ສະດຸ້ງໄດ້ແລ້ວ ລະໄພ ແລະ ຄວາມຢ້ານກົວໄດ້ແລ້ວ

ຍ້ອນເຫດໃດ? ສັດເຫຼົ່ານັ້ນຈຶ່ງຕັດຮຽກວ່າ ຜູ້ໝັ້ນຄົງ

ສັດເຫຼົ່ານັ້ນ ບໍ່ສະດຸ້ງ ຄື ບໍ່ເກງກົວ ບໍ່ຫວາດກົວ ບໍ່ຢ້ານກົວ ບໍ່ເຖິງຄວາມສະດຸ້ງ ຍ້ອນເຫດນັ້ນ ສັດເຫຼົ່ານັ້ນ ຈຶ່ງຕັດຮຽກວ່າ ຜູ້ໝັ້ນຄົງ

ຄຳວ່າ ເພິ່ງແຜ່ເມດຕາໄປສູ່ສັດທັງຜູ້ສະດຸ້ງ ແລະ ຜູ້ໝັ້ນຄົງ ອະທິບາຍວ່າ ເພິ່ງແຜ່ ຄື ຂະຫຍາຍເມດຕາ ໄດ້ແກ່ ເພິ່ງເປັນຜູ້ມີຈິດປະກອບດ້ວຍເມດຕາ ອັນໄພບູນ ເປັນມະຫັກ ຄະຕະບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນ ແຜ່ໄປສູ່ສັດທັງຜູ້ສະດຸ້ງ ແລະ ຜູ້ໝັ້ນຄົງຢູ່ ລວມຄວາມວ່າ ເພິ່ງແຜ່ເມດຕາໄປສູ່ສັດທັງຜູ້ສະດຸ້ງ ແລະຜູ້ໝັ້ນຄົງ

ຄຳວ່າ ເມື່ອໃດ ໃນຄຳວ່າ ເມື່ອໃດ ພິກຂຸຮູ້ແຈ້ງຄວາມຂຸ່ນມົວແຫ່ງໃຈ ໄດ້ແກ່ໃນການໃດ

ຄຳວ່າ ແຫ່ງໃຈ ອະທິບາຍວ່າ ຈິດ ມະໂນ ມານັດ ຫົວໃຈ ປັນຖະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດ ອັນເກີດຈາກຜັດສະເປັນຕົ້ນນັ້ນ ຈິດຂຸ່ນມົວ ເສົ້າໝອງ ຫຍຸ້ງຍາກ ວຸ່ນວາຍ ຫວັ່ນໄຫວ ໝຸນວົນ ບໍ່ສະຫງົບດ້ວຍກາຍທຸດຈະຣິດ ຈິດຂຸ່ນມົວ ເສົ້າໝອງ ຫຍຸ້ງຍາກ ວຸ່ນວາຍ ຫວັ່ນໄຫວ ໝຸນວົນ ບໍ່ສະຫງົບດ້ວຍວະຈີທຸດຈະຣິດ ຯລຯ ມະໂນທຸດຈະຣິດ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖຳພະ ຯລຯ ສາຣຳພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກຂະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ

ຄຳວ່າ ເມື່ອໃດ ພິກຂຸຮູ້ແຈ້ງຄວາມຂຸ່ນມົວແຫ່ງໃຈ ອະທິບາຍວ່າ ຮູ້ ຄື ຮູ້ທົ່ວ ຮູ້ແຈ່ມແຈ້ງ ຮູ້ສະເພາະ ແທງຕະຫຼອດຄວາມທີ່ຈິດຂຸ່ນມົວ ລວມຄວາມວ່າ ເມື່ອໃດ ພິກຂຸຮູ້ແຈ້ງຄວາມຂຸ່ນມົວ ແຫ່ງໃຈ

ຄຳວ່າ ເມື່ອນັ້ນ ທ່ານເພິ່ງບັນເທົາເສຍດ້ວຍມະນະສິການວ່າ ນີ້ ເປັນຝັກຝ່າຍແຫ່ງມານຜູ້ມີກຳດຳ ອະທິບາຍວ່າ

ຄຳວ່າ ຜູ້ມີກຳດຳ ໄດ້ແກ່ ມານຜູ້ມີກຳດຳ ຄື ຜູ້ຍິ່ງໃຫຍ່ ພາໄປສູ່ຄວາມຕາຍ ບໍ່ໃຫ້ສັດຫຼຸດພົ້ນ ເປັນເຜົ່າພັນຂອງຜູ້ຜະໝາດ ພິກຂຸເພິ່ງລະ ບັນເທົາ ຄື ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ດ້ວຍມະນະສິການວ່າ ນີ້ເປັນຝັກຝ່າຍແຫ່ງມານຜູ້ມີກຳດຳ ຄື ເປັນຝັກຝ່າຍແຫ່ງມານ ເປັນບ້ວງແຫ່ງມານ ເປັນເບັດແຫ່ງມານ ເປັນເຫຍື່ອແຫ່ງມານ ເປັນວິໄສແຫ່ງມານ ເປັນບ່ອນຢູ່ຂອງມານ ເປັນໂຄຈອນຂອງມານ ເປັນເຄື່ອງຜູກຂອງມານ ລວມຄວາມວ່າ ເມື່ອນັ້ນທ່ານເພິ່ງບັນເທົາສາດ້ວຍມະນະສິການວ່າ ນີ້ເປັນຝັກຝ່າຍແຫ່ງມານຜູ້ມີກຳດຳ ແນວນີ້ແດ່

ອີກໄນໜຶ່ງ ເພິ່ງລະ ບັນເທົາ ຄື ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ດ້ວຍມະນະສິການວ່າ ນີ້ເປັນຝັກຝ່າຍແຫ່ງມານຜູ້ມີກຳດຳ ເປັນຝັກຝ່າຍແຫ່ງມານ ເປັນຝັກຝ່າຍ ແຫ່ງອະກຸສົນ ເປັນເຫດໃຫ້ເກີດທຸກ ມີທຸກເປັນວິບາກ ເປັນເຫດໃຫ້ເປັນໄປໃນນະຣົກ  ເປັນເຫດໃຫ້ເປັນໄປໃນກຳເນີດເດຍຣັດສານ ເປັນເຫດໃຫ້ເປັນໄປໃນເຜດວິໄສ ລວມຄວາມວ່າ ເມື່ອນັ້ນທ່ານເພິ່ງບັນເທົາເສຍດ້ວຍມະນະສິການວ່າ ນີ້ເປັນຝັກຝ່າຍແຫ່ງມານຜູ້ມີກຳດຳແນວນີ້ແດ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງລັກ ບໍ່ເພິ່ງເວົ້າຕົວະ  
ເພິ່ງແຜ່ເມດຕາໄປສູ່ສັດທັງຜູ້ສະດຸ້ງ ແລະ ຜູ້ໝັ້ນຄົງ  
ເມື່ອໃດ ພິກຂຸຮູ້ແຈ້ງຄວາມຂຸ່ນມົວແຫ່ງໃຈ  
ເມື່ອນັ້ນ ທ່ານເພິ່ງບັນເທົາສາດ້ວຍມະນະສິການວ່າ  
ນີ້ເປັນຝັກຝ່າຍແຫ່ງມານຜູ້ມີກຳດຳ

[໔໐໓] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸບໍ່ເພິ່ງລຸອຳນາດຄວາມໂກດ ແລະ ຄວາມດູໝິ່ນ  
ທັງເພິ່ງຂຸດຮາກຄວາມໂກດ ແລະ ຄວາມດູໝິ່ນເຫຼົ່ານັ້ນ ດຳຣົງຢູ່  
ແຕ່ເມື່ອຈະກຳຈັດ ກໍເພິ່ງຄອບງຳສັດ ຫຼື ສັງຂານ  
ທີ່ເປັນທີ່ຮັກ ຫຼື ບໍ່ເປັນທີ່ຮັກ ໂດຍແທ້

# ວ່າດ້ວຍຄວາມໂກດ ແລະ ຄວາມດູໝິ່ນ

ຄໍາວ່າ ຄວາມໂກດ ໃນຄໍາວ່າ ພິກຂຸບໍ່ເພິ່ງລຸອໍານາດຄວາມໂກດ ແລະ ຄວາມດູໝິ່ນ ໄດ້ແກ່ ໃຈປອງຮ້າຍ ມຸ້ງຮ້າຍ ໆລໆ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ

ຄໍາວ່າ ຄວາມດູໝິ່ນ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ດູໝິ່ນຜູ້ອື່ນ ຍ້ອນຊາດແດ່ ຍ້ອນໂຄດແດ່ ໆລໆ ຫຼື ຍ້ອນເລື້ອງອື່ນນອກຈາກທີ່ກ່າວແລ້ວແດ່

ຄໍາວ່າ ພິກຂຸບໍ່ເພິ່ງລຸອໍານາດຄວາມໂກດ ແລະຄວາມດູໝິ່ນ ອະທິບາຍວ່າ ບໍ່ເພິ່ງລຸອໍານາດແຫ່ງຄວາມໂກດ ແລະ ຄວາມດູໝິ່ນ ຄື ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມໂກດ ແລະ ຄວາມດູໝິ່ນ ລວມຄວາມວ່າ ພິກຂຸບໍ່ເພິ່ງລຸອໍານາດຄວາມໂກດ ແລະ ຄວາມດູໝິ່ນ

ຄໍາວ່າ ທັງເພິ່ງຂຸດຮາກຄວາມໂກດ ແລະ ຄວາມດູໝິ່ນເຫຼົ່ານັ້ນ ດໍາຣົງຢູ່ ອະທິບາຍວ່າ

ຮາກແຫ່ງຄວາມໂກດ ເປັນແນວໃດ?

ຄື ອະວິດຊາ (ຄວາມບໍ່ຮູ້) ອະໂຍນິໂສມະນະສິການ (ຄວາມບໍ່ເຮັດໄວ້ໃນໃຈໂດຍແຍບຄາຍ) ອັດສະມິມານະ (ຄວາມຖືຕົວ) ອະຫິຣິກະ (ຄວາມບໍ່ລະອາຍ) ອະໂນດຕັບປະ(ຄວາມບໍ່ເກງກົວ) ອຸດທັດຈະ (ຄວາມຟຸ້ງຊ່ານ) ແຕ່ລະຢ່າງລ້ວນເປັນຮາກ ນີ້ຊື່ວ່າ ຮາກແຫ່ງຄວາມໂກດ

ຮາກແຫ່ງຄວາມດູໝິ່ນ ເປັນແນວໃດ?

ຄື ອະວິດຊາ ອະໂຍນິໂສມະນະສິການ ອັດສະມິມານະ ອະຫິຣິກະ ອະໂນດຕັບປະ ອຸດທັດຈະ ແຕ່ລະຢ່າງລ້ວນເປັນຮາກ ນີ້ຊື່ວ່າຮາກແຫ່ງຄວາມດູໝິ່ນ

ຄໍາວ່າ ທັງເພິ່ງຂຸດຮາກຄວາມໂກດ ແລະ ຄວາມດູໝິ່ນເຫຼົ່ານັ້ນ ດໍາຣົງຢູ່ ອະທິບາຍ ວ່າ ເພິ່ງຂຸດ ຄື ຖອນ ດຶງ ລົກ ກົ່ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຮາກແຫ່ງຄວາມໂກດ ແລະ ຄວາມດູໝິ່ນ ດໍາຣົງຢູ່ ຄື ດໍາຣົງໝັ້ນ ລວມຄວາມວ່າ ທັງເພິ່ງຂຸດຮາກຄວາມໂກດ ແລະ ຄວາມດູໝິ່ນເຫຼົ່ານັ້ນ ດໍາຣົງຢູ່

ຄໍາວ່າ ແຕ່ ໃນຄໍາວ່າ ແຕ່ເມື່ອຈະກໍາຈັດ ກໍເພິ່ງຄອບງໍາສັດ ຫຼື ສັງຂານທີ່ເປັນທີ່ຮັກ ຫຼື ບໍ່ເປັນທີ່ຮັກ ໂດຍແທ້ ເປັນບົດສົນທິ ເປັນຄໍາເຊື່ອມບົດ ເປັນຄໍາທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສໍາພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄໍາວ່າ ແຕ່ນີ້ ເປັນຄໍາເຊື່ອມບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄໍາວ່າ ເປັນທີ່ຮັກ ໄດ້ແກ່ ສິ່ງເປັນທີ່ຮັກ ໒ ຈໍາພວກ ຄື (໑) ສັດ (໒) ສັງຂານ ສັດເຫຼົ່າໃດເປັນທີ່ຮັກ ສັດທັງຫຼາຍໃນໂລກນີ້ ເປັນຜູ້ປາຖະໜາແຕ່ສິ່ງທີ່ເປັນປະໂຫຍດ ປາຖະໜາແຕ່ສິ່ງທີ່ເກື້ອກູນ ປາຖະໜາແຕ່ຄວາມຜາສຸກ ປາຖະໜາແຕ່ຄວາມຫຼຸດພົ້ນຈາກໂຍຄະ ຄື ມານດາ ບິດາ

ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ບຸດ ທິດາ ມິດ ອຳມາດ ຍາດພີ່ນ້ອງ ຫຼື ຜູ້ຮ່ວມສາຍໂລຫິດຂອງຜູ້ນັ້ນ ສັດເຫຼົ່ານີ້ ຊື່ວ່າ ສິ່ງເປັນທີ່ຮັກ

ສັງຂານເຫຼົ່າໃດເປັນທີ່ຮັກ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ໜ້າພໍໃຈ ສັງຂານ ເຫຼົ່ານີ້ ຊື່ວ່າສິ່ງເປັນທີ່ຮັກ

ຄຳວ່າ ບໍ່ເປັນທີ່ຮັກ ໄດ້ແກ່ ສິ່ງບໍ່ເປັນທີ່ຮັກ ໒ ຈຳພວກ ຄື (໑) ສັດ (໒) ສັງຂານ ສັດເຫຼົ່າໃດບໍ່ເປັນທີ່ຮັກ ສັດທັງຫຼາຍໃນໂລກນີ້ເປັນຜູ້ປາຖະໜາ ແຕ່ສິ່ງທີ່ບໍ່ແມ່ນປະໂຫຍດ ປາຖະໜາແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ຄວາມບໍ່ຜາສຸກ ບໍ່ປາຖະໜາຄວາມຫຼຸດພົ້ນຈາກ ໂຍຄະ ປາຖະໜາຈະປົງຊີວິດຂອງຜູ້ນັ້ນ ສັດເຫຼົ່ານີ້ ຊື່ວ່າ ບໍ່ເປັນທີ່ຮັກ

ສັງຂານເຫຼົ່າໃດບໍ່ເປັນທີ່ຮັກ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ບໍ່ໜ້າພໍໃຈ ສັງຂານເຫຼົ່ານີ້ ຊື່ວ່າບໍ່ເປັນທີ່ຮັກ

ຄຳວ່າ ໂດຍແທ້ ເປັນຄຳກ່າວໂດຍໄນດຽວ ເປັນຄຳກ່າວໂດຍບໍ່ສົງໄສ ເປັນຄຳກ່າວໂດຍບໍ່ເຄືອບແຄງ ເປັນຄຳກ່າວໂດຍບໍ່ເປັນ ໒ ໄນ ເປັນຄຳກ່າວໂດຍບໍ່ເປັນ ໒ ຢ່າງ ເປັນຄຳກ່າວໂດຍຮັດກຸມ ເປັນຄຳກ່າວໂດຍບໍ່ຜິດ ຄຳວ່າ ໂດຍແທ້ ນີ້ ເປັນຄຳກ່າວທີ່ກຳນົດໄວ້ ແນ່ແລ້ວ

ຄຳວ່າ ແຕ່ເມື່ອຈະກຳຈັດ ກໍເພິ່ງຄອບງຳສັດ ຫຼື ສັງຂານທີ່ເປັນທີ່ຮັກ ຫຼື ບໍ່ເປັນທີ່ຮັກໂດຍແທ້ ອະທິບາຍວ່າ ເມື່ອຈະຄອບງຳກໍເພິ່ງກຳຈັດ ຫຼື ເມື່ອຈະກຳຈັດ ກໍເພິ່ງຄອບງຳສັດແລະສັງຂານທັງທີ່ເປັນທີ່ຮັກ ແລ ະບໍ່ເປັນທີ່ຮັກ ທັງທີ່ເປັນສຸກ ແລະ ເປັນທຸກ ທັງທີ່ໜ້າຍິນດີ ແລະບໍ່ໜ້າຍິນດີ ທັງທີ່ເປັນໂສມະນັດ ແລະ ໂທມະນັດ ທັງທີ່ເປັນອິດຖາຣົມ ແລະ ອະນິດຖາຣົມ ລວມຄວາມວ່າ ແຕ່ເມື່ອຈະກຳຈັດ ກໍເພິ່ງຄອບງຳສັດ ຫຼື ສັງຂານທີ່ເປັນທີ່ຮັກ ຫຼື ບໍ່ເປັນທີ່ຮັກໂດຍແທ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸບໍ່ເພິ່ງລຸອຳນາດຄວາມໂກດ ແລະ ຄວາມດູໝິ່ນ
ທັງເພິ່ງຂຸດຮາກຄວາມໂກດ ແລະ ຄວາມດູໝິ່ນເຫຼົ່ານັ້ນ ດຳຣົງຢູ່
ແຕ່ເມື່ອຈະກຳຈັດ ກໍເພິ່ງຄອບງຳສັດ ຫຼື ສັງຂານ
ທີ່ເປັນທີ່ຮັກ ຫຼື ບໍ່ເປັນທີ່ຮັກໂດຍແທ້

[໒໐໒] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸຜູ້ມີປີຕິໃນເລື້ອງດີງາມ
ເພິ່ງເຊີດຊູປັນຍາ ເພິ່ງຂົ່ມອັນຕະລາຍເຫຼົ່ານັ້ນ
ເພິ່ງຜາບຄວາມບໍ່ຍິນດີໃນບ່ອນນອນອັນສະຫງັດ

ທັງຜາບທຳອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮ ໔ ປະການ

ວ່າດ້ວຍການມີປີຕິ ແລະ ການເຊີດຊູປັນຍາ

ຄຳວ່າ ປັນຍາ ໃນຄຳວ່າ ພິກຂຸຜູ້ມີປີຕິໃນເລື້ອງດີງາມ ເພິ່ງເຊີດຊູປັນຍາ ໄດ້ແກ່ ຄວາມຮູ້ທົ່ວ ຄື ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມໄຈ້ແຍກ ฯລฯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ

ຄຳວ່າ ເພິ່ງເຊີດຊູປັນຍາ ອະທິບາຍວ່າ ພິກຂຸບາງອົງໃນທຳວິໄນນີ້ ຫ່ງວເຊີດຊູ ປັນຍາ ມີປັນຍາເປັນທຸງໄຊ ມີປັນຍາເປັນຍອດທຸງ ມີປັນຍາເປັນໃຫຍ່ ຫຼາຍດ້ວຍການ ໄຈ້ແຍກ ຫຼາຍດ້ວຍການກວດສອບ ຫຼາຍດ້ວຍປັນຍາເພ່ງພິນິດ ຫຼາຍດ້ວຍປັນຍາເພ່ງ ພິຈາລະນາ ຢູ່ດ້ວຍປັນຍາແຈ່ມແຈ້ງ ຫ່ງວໄປດ້ວຍປັນຍານັ້ນ ຫຼາຍດ້ວຍປັນຍານັ້ນ ໜັກໃນປັນຍານັ້ນ ເອນໄປໃນປັນຍານັ້ນ ໂອນໄປໃນປັນຍານັ້ນ ໂນ້ມໄປໃນປັນຍານັ້ນ ນ້ອມໃຈເຊື່ອປັນຍານັ້ນ ມີປັນຍານັ້ນເປັນໃຫຍ່ ລວມຄວາມວ່າ ເພິ່ງເຊີດຊູປັນຍາ ແນວນີ້ແດ່

ອີກໄນໜຶ່ງ ພິກຂຸຍ່າງຢູ່ກໍຮູ້ວ່າ ກຳລັງຍ່າງ ຢືນຢູ່ກໍຮູ້ວ່າ ກຳລັງຢືນ ນັ່ງຢູ່ກໍຮູ້ວ່າ ກຳລັງນັ່ງ ນອນຢູ່ກໍຮູ້ວ່າ ກຳລັງນອນ ຫຼື ທ່ານດຳຣົງກາຍໄວ້ດ້ວຍອິລິຍາບົດຢ່າງໃດ ໆ ກໍຮູ້ ອິລິຍາ ບົດຢ່າງນັ້ນ ໆ ລວມຄວາມວ່າ ເພິ່ງເຊີດຊູປັນຍາ ແນວນີ້ແດ່

ອີກໄນໜຶ່ງ ພິກຂຸທຳຄວາມຮູ້ສຶກຕົວໃນການກ້າວໄປ ການຖອຍກັບ ฯລฯ ໃນການແລເບິ່ງ ການຫຼຽວເບິ່ງ ฯລฯ ໃນການຄູ້ເຂົ້າ ການຢຽດອອກ ฯລฯ ໃນການຄອງສັງຄາຕິ ບາດ ແລະຈີວອນ ฯລฯ ໃນການສັນ ການດື່ມ ການຫຍ້ຳ ການຊີມຣົດ ການຖ່າຍອຸດຈາຣະ ປັດສາວະ ທຳຄວາມຮູ້ສຶກຕົວໃນການຍ່າງ ການຢືນ ການນັ່ງ ການຫຼັບ ການຕື່ນ ການເວົ້າ ການນິ່ງ ລວມຄວາມວ່າ ເພິ່ງເຊີດຊູປັນຍາ ແນວນີ້ແດ່

ຄຳວ່າ ຜູ້ມີປີຕິໃນເລື້ອງດີງາມ ໄດ້ແກ່ ປີຕິ ຄື ປາໂມດ ເກີດດ້ວຍອຳນາດພຸດທານຸສະຕິ

ຄຳວ່າ ຜູ້ມີປີຕິໃນເລື້ອງດີງາມ ອະທິບາຍວ່າ ປີຕິ ຄື ປາໂມດ ເກີດດ້ວຍອຳນາດ ທຳມານຸດສະຕິ ສັງຄານຸດສະຕິ ສີລານຸດສະຕິ ຈາຄານຸດສະຕິ ເທວະຕານຸດສະຕິ ອານາປານັດສະຕິ ມໍຣະນະສະຕິ ກາຍະຄະຕາສະຕິ ອຸປະສະມານຸດສະຕິ ຊື່ວ່າມີປີຕິໃນເລື້ອງດີງາມ ລວມຄວາມວ່າ ພິກຂຸຜູ້ມີປີຕິໃນເລື້ອງດີງາມເພິ່ງເຊີດຊູປັນຍາ

ຄຳວ່າ ອັນຕະລາຍ ໃນຄຳວ່າ ເພິ່ງຂົ່ມອັນຕະລາຍເຫຼົ່ານັ້ນ ໄດ້ແກ່ ອັນຕະລາຍ ໒ ຢ່າງ ຄື (໑) ອັນຕະລາຍທີ່ຜາກົດ (໒) ອັນຕະລາຍທີ່ບໍ່ຜາກົດ ฯລฯ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ຜາກົດ ฯລฯ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ບໍ່ຜາກົດ ฯລฯ ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ແນວນີ້ແດ່

ຄຳວ່າ ເພິ່ງຂົ່ມອັນຕະລາຍເຫຼົ່ານັ້ນ ອະທິບາຍວ່າ ເພິ່ງຂົ່ມ ຄື ຄອບງຳ ຖ້ວມທັບ ຮັດຄືງ ຍ່ຳຍີອັນຕະລາຍເຫຼົ່ານັ້ນໃຫ້ໄດ້ ລວມຄວາມວ່າ ເພິ່ງຂົ່ມອັນຕະລາຍເຫຼົ່ານັ້ນ

ຄຳວ່າ ຄວາມບໍ່ຍິນດີ ໃນຄຳວ່າ ເພິ່ງຜາບຄວາມບໍ່ຍິນດີໃນບ່ອນນອນອັນສະຫງັດ ໄດ້ແກ່ ຄວາມບໍ່ຍິນດີ ຄື ຄວາມບໍ່ໃຍດີ ຄວາມບໍ່ຍິນດີຍິ່ງ ຄວາມບໍ່ພໍໃຈ ຄວາມເບື່ອໜ່າຍ ຄວາມຣະອາ

ຄຳວ່າ ໃນບ່ອນນອນອັນສະຫງັດ ອະທິບາຍວ່າ ເພິ່ງຜາບ ຄື ເພິ່ງຄອບງຳ ຖ້ວມທັບຮັດຄືງ ຍ່ຳຍີຄວາມບໍ່ຍິນດີໃນເສນາສະນະອັນສະຫງັດ ຫຼື ໃນທຳອັນເປັນກຸສົນຍິ່ງແນວໃດແນວໜຶ່ງ ລວມຄວາມວ່າ ເພິ່ງຜາບຄວາມບໍ່ຍິນດີໃນບ່ອນນອນອັນສະຫງັດ

ຄຳວ່າ ທັງຜາບທຳອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮ ໔ ປະການ ອະທິບາຍ ວ່າ ເພິ່ງຜາບ ຄື ຂົ່ມ ຄອບງຳ ຖ້ວມທັບ ຮັດຄືງ ຍ່ຳຍີທຳອັນເປັນບ່ອນຕັ້ງແຫ່ງຄວາມ ຄ່ຳຄວນ ໔ ປະການ ລວມຄວາມວ່າ ທັງຜາບທຳອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮ ໔ ປະການ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸຜູ້ມີປີຕິໃນເລື້ອງດີງາມ
ເພິ່ງເຊີດຊູປັນຍາ ເພິ່ງຂົ່ມອັນຕະລາຍເຫຼົ່ານັ້ນ
ເພິ່ງຜາບຄວາມບໍ່ຍິນດີໃນບ່ອນນອນອັນສະຫງັດ
ທັງຜາບທຳອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮ ໔ ປະການ

[໘໐໕] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ເຮົາຈັກສັນອັນໃດນໍ ຫຼື ຈັກສັນບ່ອນໃດ
ຄືນນີ້ ເຮົານອນລຳບາກແລ້ວນໍ ເຮົາຈັກນອນບ່ອນໃດນໍ
ພິກຂຸຜູ້ເປັນເສຂະ ເພິ່ງກຳຈັດວິຕົກອັນເປັນບ່ອນຕັ້ງ
ແຫ່ງຄວາມຮ່ຳໄຮເຫຼົ່ານີ້ ເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ

## ວ່າດ້ວຍຄວາມວິຕົກເປັນເຫດລຳພັນ

ຄຳວ່າ ເຮົາຈະສັນອັນໃດນໍ ໃນຄຳວ່າ ເຮົາຈະສັນອັນໃດນໍ ຫຼື ຈັກສັນບ່ອນໃດ ອະທິບາຍວ່າ ເຮົາຈັກສັນອັນໃດ ຄື ເຂົ້າ ເຂົ້າໜົມກຸມມາດ ເຂົ້າຜົງ ປາ ຫຼື ຊີ້ນ ລວມຄວາມວ່າ ເຮົາຈະສັນອັນໃດນໍ

ຄຳວ່າ ຫຼື ຈັກສັນບ່ອນໃດ ອະທິບາຍວ່າ ເຮົາຈະສັນອັນໃດນໍ ບ່ອນໃດ ຄື ທີ່ຕະກູນກະສັດ ຕະກູນພາມ ຕະກູນແພດ ຫຼື ຕະກູນສູດ ລວມຄວາມວ່າ ເຮົາຈະສັນອັນໃດນໍ ຫຼື ຈັກສັນບ່ອນໃດ

ຄຳວ່າ ຄືນນີ້ ເຮົານອນລຳບາກແລ້ວນໍ ເຮົາຈັກນອນບ່ອນໃດນໍ ອະທິບາຍວ່າ ຄືນນີ້ ເຮົານອນລຳບາກເທິງແຜ່ນແປ້ນ ສາດ ແຜ່ນໜັງ ເຄື່ອງປູລາດເຮັດດ້ວຍຫຍ້າ ເຄື່ອງປູລາດເຮັດດ້ວຍໃບໄມ້ ຫຼື ເຄື່ອງປູລາດເຮັດດ້ວຍເຟືອງ ຄືນຕໍ່ມາ ເຮົາຈັກນອນໃຫ້ສະບາຍ ບ່ອນໃດ ຄື ເທິງຕຽງ ຕັ່ງ ຟູກ ໝອນ ໃນວິຫານ ເຮືອນຫຼັງຄາດ້ານດຽວ ຜາສາດ ເຮືອນໂລ້ນ ຫຼືຖ້ຳ ລວມຄວາມວ່າ ຄືນນີ້ ເຮົານອນລຳບາກແລ້ວນໍ ເຮົາຈັກນອນບ່ອນໃດນໍ

ຄຳວ່າ ວິຕົກເຫຼົ່ານີ້ ໃນຄຳວ່າ ວິຕົກອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮເຫຼົ່ານີ້ ໄດ້ແກ່ ວິຕົກກ່ຽວກັບບິນທະບາດ[9] ໔ ຢ່າງ ວິຕົກກ່ຽວກັບເສນາສະນະ ໔ ຢ່າງ

ຄຳວ່າ ອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮ ໄດ້ແກ່ ເປັນບ່ອນຕັ້ງແຫ່ງການປັບທຸກ ເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮ ລວມຄວາມວ່າ ວິຕົກອັນເປັນບ່ອນຕັ້ງແຫ່ງຄວາມຮ່ຳໄຮເຫຼົ່ານີ້

ຄຳວ່າ ພິກຂຸຜູ້ເປັນເສຂະ ໃນຄຳວ່າ ພິກຂຸຜູ້ເປັນເສຂະ ເພິ່ງກຳຈັດ ຯລຯ ເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ ອະທິບາຍວ່າ ຍ້ອນເຫດໃດ ຈຶ່ງຕັດຮຽກວ່າ ເສຂະ ຍ້ອນກຳລັງສຶກສາ ຈຶ່ງຊື່ວ່າເສຂະ ກຳລັງສຶກສາອັນໃດ ກຳລັງສຶກສາອະທິສີລະສິກຂາແດ່ ອະທິຈິດຕະສິກຂາແດ່ ອະທິປັນຍາສິກຂາແດ່ ອະທິສີລະສິກຂາ ເປັນແນວໃດ? ຯລຯ ນີ້ຊື່ວ່າ ອະທິປັນຍາສິກຂາ

ສິກຂາ ໓ ເຫຼົ່ານີ້ ເມື່ອພຣະເສຂະນຶກເຖິງ ຊື່ວ່າກຳລັງສຶກສາ ເມື່ອຮູ້ ຊື່ວ່າກຳລັງສຶກສາ ເມື່ອເຫັນ ຊື່ວ່າກຳລັງສຶກສາ ເມື່ອພິຈາລະນາ ຊື່ວ່າກຳລັງສຶກສາ ເມື່ອອະທິຖານຈິດຊື່ວ່າກຳລັງສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າກຳລັງສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າກຳລັງສຶກສາ ເມື່ອຕັ້ງສະຕິ ຊື່ວ່າກຳລັງສຶກສາ ເມື່ອຕັ້ງໃຈໝັ້ນ ຊື່ວ່າກຳລັງສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າກຳລັງສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າກຳລັງສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າກຳລັງສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າກຳລັງສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າກຳລັງສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າກຳລັງສຶກສາ ຄື ປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານສຶກສາ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າເສຂະ

ພຣະເສຂະເພິ່ງສຶກສາອະທິສີລະສິກຂາແດ່ ອະທິຈິດຕະສິກຂາແດ່ ອະທິປັນຍາສິກຂາແດ່ ເພື່ອກຳຈັດ ບັນເທົາ ລະ ສະງົບ ສະລັດຖິ້ມ ຣະງັບ

ສິກຂາ ໓ ເຫຼົ່ານີ້ ເມື່ອພຣະເສຂະນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ພິກຂຸຜູ້ເປັນເສຂະ ເພິ່ງກຳຈັດ

ຄຳວ່າ ເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ ອະທິບາຍວ່າ

ພິກຂຸເປັນຜູ້ມີຄວາມກັງວົນທ່ອງທ່ຽວໄປ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ປະກອບດ້ວຍຄວາມກັງວົນເລື້ອງຕະກູນ ໆລໆ ຄວາມກັງວົນເລື້ອງໝູ່ຄະນະ ໆລໆ ຄວາມກັງວົນເລື້ອງອາວາດ ໆລໆ ຄວາມກັງວົນເລື້ອງຈີວອນ ໆລໆ ຄວາມກັງວົນ ເລື້ອງບິນທະບາດ ໆລໆ ຄວາມກັງວົນເລື້ອງເສນາສະນະ ເປັນຜູ້ປະກອບດ້ວຍຄວາມກັງວົນເລື້ອງ ຄິລານະປັດໄຈເພສັດບໍຣິຂານ ພິກຂຸຊື່ວ່າເປັນຜູ້ມີຄວາມກັງວົນທ່ອງທ່ຽວໄປເປັນແນວນີ້

ພິກຂຸເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ ເປັນຜູ້ບໍ່ປະກອບດ້ວຍຄວາມກັງວົນເລື້ອງຕະກູນ ບໍ່ປະກອບດ້ວຍຄວາມກັງວົນເລື້ອງໝູ່ຄະນະ ອາວາດ ຈີວອນ ບິນທະບາດ ແລະ ຄິລານະປັດໄຈເພສັດບໍຣິຂານ ພິກຂຸຊື່ວ່າເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ ເປັນແນວນີ້

(ສົມຈິງດັ່ງພາສິດວ່າ)

ເຫຼົ່າພິກຂຸໄປແຄວ້ນມະຄົດ ໄປແຄວ້ນໂກສົນ
ແຕ່ບາງພວກທ່ຽວໄປບໍ່ພ້ອມກັບໝູ່ ຈາກແຄວ້ນວັດຊີ
ເໝືອນເຫຼົ່າມະຣຶຄະ ເປັນຜູ້ບໍ່ມີກັງວົນຢູ່
ການປະພຶດຕົນເປັນຄົນມັກໜ້ອຍ ເປັນຄວາມດີ
ການປະພຶດສຸດຈະຣິດ ເປັນຄວາມດີ
ການປະຕິບັດເພື່ອລະການມະຄຸນ ໕ ທຸກເມື່ອ ເປັນຄວາມດີ
ການຖາມສິ່ງທີ່ເປັນປະໂຫຍດ ເປັນຄວາມດີ
ການປະຕິບັດຕາມໂອວາດໂດຍເຄົາຣົບ ເປັນຄວາມດີ
ກິດມີການຟັງເປັນຕົ້ນ ເປັນເຄື່ອງໝາຍຄວາມເປັນສະມະນະ
ຂອງຜູ້ໝົດຄວາມກັງວົນ

ລວມຄວາມວ່າ ພິກຂຸຜູ້ເປັນເສຂະເພິ່ງກຳຈັດ ໆລໆ ເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ເຮົາຈະສັນອັນໃດນໍ ຫຼື ຈັກສັນບ່ອນໃດ
ຄືນນີ້ ເຮົານອນລຳບາກແລ້ວນໍ ເຮົາຈັກນອນບ່ອນໃດນໍ
ພິກຂຸຜູ້ເປັນເສຂະ ເພິ່ງກຳຈັດວິຕົກອັນເປັນບ່ອນຕັ້ງ
ແຫ່ງຄວາມຮ່ຳໄຮເຫຼົ່ານີ້ ເປັນຜູ້ບໍ່ມີກັງວົນທ່ອງທ່ຽວໄປ

[໔໐໙] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸນັ້ນໃນທຳວິໄນນີ້
ໄດ້ອາຫານ ແລະ ເຄື່ອງນຸ່ງຫົ່ມໃນການແລ້ວ
ເພິ່ງຮູ້ຈັກປະມານເພື່ອສັນໂດດ
ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ
ເປັນຜູ້ສັງລວມທ່ຽວໄປໃນໝູ່ບ້ານ
ແມ່ນຖືກດ່າກໍບໍ່ເພິ່ງກ່າວວາຈາຫຍາບ

## ວ່າດ້ວຍການໄດ້ອາຫານ ແລະເຄື່ອງນຸ່ງຫົ່ມໂດຍຊອບທຳ

ຄຳວ່າ ອາຫານ ໃນຄຳວ່າ ໄດ້ອາຫານ ແລະ ເຄື່ອງນຸ່ງຫົ່ມໃນການແລ້ວ ໄດ້ແກ່ ເຂົ້າສຸກ ເຂົ້າໜົມກຸມມາດ ເຂົ້າຜົງ ປາ ຊີ້ນ

ຄຳວ່າ ເຄື່ອງນຸ່ງຫົ່ມ ໄດ້ແກ່ ຈີວອນ ໖ ຊະນິດ ຄື

| | |
|---|---|
| ໑. ໂຂມະ | ໔. ກັບປາສິກະ |
| ໒. ໂກເສີຍຍະ | ໕. ກຳພະລະ |
| ໓. ສານະ | ໖. ພັງຄະ |

ຄຳວ່າ ໄດ້ອາຫານ ແລະ ເຄື່ອງນຸ່ງຫົ່ມໃນການແລ້ວ ອະທິບາຍວ່າ ໄດ້ແລ້ວ ຄື ໄດ້ຮັບແລ້ວ ສົມຫວັງແລ້ວ ປະສົບແລ້ວ ໄດ້ສະເພາະແລ້ວເຊິ່ງຈີວອນ ບິນທະບາດ ບໍ່ແມ່ນດ້ວຍການເວົ້າຕົວະ ບໍ່ແມ່ນດ້ວຍການເວົ້າລຽບຄຽງ ບໍ່ແມ່ນດ້ວຍການເຮັດນິມິດ ບໍ່ແມ່ນດ້ວຍການກຳຈັດຄຸນເຂົາ ມິແມ່ນດ້ວຍການຕໍ່ລາບດ້ວຍລາບ ບໍ່ແມ່ນດ້ວຍການໃຫ້ໄມ້ ບໍ່ແມ່ນດ້ວຍການໃຫ້ໄມ້ໄຜ່ ບໍ່ແມ່ນດ້ວຍການໃຫ້ໃບໄມ້ ບໍ່ແມ່ນດ້ວຍການໃຫ້ດອກໄມ້ ບໍ່ແມ່ນດ້ວຍການໃຫ້ ໝາກໄມ້ ບໍ່ແມ່ນດ້ວຍການໃຫ້ນ້ຳອາບ ບໍ່ແມ່ນດ້ວຍການໃຫ້ແປ້ງຈຸນ ບໍ່ແມ່ນດ້ວຍການໃຫ້ດິນສໍພອງ ບໍ່ແມ່ນດ້ວຍການໃຫ້ໄມ້ສີແຂ້ວ ບໍ່ແມ່ນດ້ວຍການໃຫ້ນ້ຳບ້ວນປາກ ບໍ່ແມ່ນດ້ວຍຄຳເວົ້າມຸ້ງໃຫ້ເຂົາຮັກຕົນ ບໍ່ແມ່ນດ້ວຍຄຳເວົ້າເຫຼາະແຫຼະເໝືອນແກງຖົ່ວ ບໍ່ແມ່ນດ້ວຍກິຣິຍາປະຈົບ ບໍ່ແມ່ນດ້ວຍການຂັດຕັ້ງຕີສະນິດເຂົາ ບໍ່ແມ່ນດ້ວຍວິຊາເບິ່ງພື້ນທີ່ ບໍ່ແມ່ນດ້ວຍເດຍຣັດສານວິຊາ ບໍ່ແມ່ນດ້ວຍວິຊາທຳນາຍລັກສະນະອະໄວຍະວະ ບໍ່ແມ່ນດ້ວຍວິຊາເບິ່ງເລີກຍາມ ບໍ່ແມ່ນດ້ວຍການຍ່າງເຮັດໜ້າທີ່ທູດ ບໍ່ແມ່ນດ້ວຍການຍ່າງເປັນຄົນຮັບໃຊ້ ບໍ່ແມ່ນດ້ວຍການຍ່າງສື່ສານ ບໍ່ແມ່ນດ້ວຍເວຊະກຳ ບໍ່ແມ່ນດ້ວຍນະວະກຳ ບໍ່ແມ່ນດ້ວຍການໃຊ້ກ້ອນເຂົ້າຕອບແທນກ້ອນເຂົ້າ ບໍ່ແມ່ນດ້ວຍການໃຫ້ ແລະ ການເພີ່ມໃຫ້ ແຕ່ໄດ້ແລ້ວ ຄື ໄດ້ຮັບແລ້ວ ສົມຫວັງແລ້ວ ປະສົບແລ້ວ ໄດ້ສະເພາະແລ້ວໂດຍຊອບທຳ ໂດຍຍຸດຕິທຳ ລວມຄວາມວ່າ ໄດ້ອາຫານ ແລະ ເຄື່ອງນຸ່ງຫົ່ມໃນການແລ້ວ

## ວ່າດ້ວຍຄວາມຮູ້ຈັກປະມານ ๘ ຢ່າງ

ຄຳວ່າ ພິກຂຸນັ້ນ ຯລຯ ເພິ່ງຮູ້ຈັກປະມານ ໃນຄຳວ່າ ພິກຂຸນັ້ນໃນທຳວິໄນນີ້ ຯລຯ ເພິ່ງຮູ້ຈັກປະມານເພື່ອສັນໂດດ ອະທິບາຍວ່າ ເພິ່ງຮູ້ຈັກປະມານໂດຍເຫດ ๘ ຢ່າງ ຄື (໑) ໂດຍການຮັບ (๘) ໂດຍການບໍຣິໂພກ

ພິກຂຸຮູ້ຈັກປະມານໂດຍການຮັບ ເປັນແນວໃດ?

ຄື ແມ່ນເມື່ອທາຍົກຖວາຍໜ້ອຍ ພິກຂຸກໍຮັບເພື່ອຄວາມອິດູຕະກູນ ເພື່ອການຮັກສາຕະກູນ ເພື່ອການອະນຸເຄາະຕະກູນ ແມ່ນເມື່ອທາຍົກຖວາຍຫຼາຍ ພິກຂຸກໍຮັບຈີວອນພໍຄຸ້ມຄອງກາຍ ຮັບບິນທະບາດພໍບໍລິຫານທ້ອງ ພິກຂຸຊື່ວ່າ ຮູ້ຈັກປະມານໂດຍການຮັບ ເປັນແນວນີ້

ພິກຂຸຮູ້ຈັກປະມານໂດຍການບໍຣິໂພກ ເປັນແນວໃດ?

ຄື ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ຈຶ່ງໃຊ້ສອຍຈີວອນ ພຽງເພື່ອປ້ອງກັນຄວາມໜາວ ປ້ອງກັນຄວາມຮ້ອນ ປ້ອງກັນສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະ ສັດເລືອຄານ ພຽງເພື່ອປົກປິດອະໄວຍະວະທີ່ກໍ່ໃຫ້ເກີດຄວາມລະອາຍ

ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ຈຶ່ງສັນບິນທະບາດ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົບແຕ່ງ ແຕ່ສັນພຽງເພື່ອໃຫ້ຮ່າງກາຍນີ້ດຳຣົງຢູ່ ເພື່ອໃຫ້ຮ່າງກາຍນີ້ດຳເນີນໄປໄດ້ ເພື່ອຣະງັບຄວາມລຳບາກ ເພື່ອອະນຸເຄາະພົມມະຈັນ ດ້ວຍມະນະສິການວ່າ ເຮົາຈັກບຳບັດເວທະນາເກົ່າ ບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ການດຳເນີນຊີວິດຂອງເຮົາຄວາມບໍ່ມີໂທດ ແລະ ຢູ່ສະບາຍ ຈັກມີໄດ້ດ້ວຍວິທີການແນວນີ້

ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ຈຶ່ງໃຊ້ສອຍເສນາສະນະ ພຽງເພື່ອປ້ອງກັນຄວາມໜາວ ປ້ອງກັນຄວາມຮ້ອນ ປ້ອງກັນສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະ ສັດເລືອຄານ ພຽງເພື່ອບັນເທົາອັນຕະລາຍຈາກລະດູ ແລະ ຄວາມຍິນດີໃນການຫຼີບຫຼີກ

ພິກຂຸພິຈາລະນາໂດຍແຍບຄາຍແລ້ວ ຈຶ່ງໃຊ້ສອຍຄິລານະປັດໄຈເພສັດບໍຣິຂານ ພຽງເພື່ອບຳບັດເວທະນາອັນເນື່ອງມາຈາກອາພາດທີ່ເກີດຂຶ້ນແລ້ວ ເພື່ອຄວາມບໍ່ລຳບາກເປັນຢ່າງຍິ່ງ ພິກຂຸຊື່ວ່າຮູ້ຈັກປະມານໂດຍການບໍຣິໂພກ ເປັນແນວນີ້

ຄຳວ່າ ພິກຂຸນັ້ນ ຯລຯ ເພິ່ງຮູ້ຈັກປະມານ ໄດ້ແກ່ ເພິ່ງຮູ້ ຄື ຮູ້ທົ່ວ ຮູ້ແຈ່ມແຈ້ງ ຮູ້ສະເພາະ ແທງຕະຫຼອດໂດຍເຫດ ๘ ຢ່າງເຫຼົ່ານີ້ ລວມຄວາມວ່າ ພິກຂຸນັ້ນ ຯລຯ ເພິ່ງຮູ້ຈັກປະມານ

ຄຳວ່າ ໃນທຳວິໄນນີ້ ຯລຯ ເພື່ອສັນໂດດ ອະທິບາຍວ່າ ພິກຂຸໃນທຳວິໄນນີ້ ເປັນຜູ້ສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້

ທັງບໍ່ປະກອບການສະແຫວງຫາຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງຈີວອນ ບໍ່ໄດ້ຈີວອນກໍບໍ່ກະວົນກະວາຍ ແລະ ໄດ້ຈີວອນແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດ ມີປັນຍາເຄື່ອງ ສະລັດອອກ ໃຊ້ສອຍຢູ່ ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້ນັ້ນ ທ່ານຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນພິກຂຸໃດຂະຫຍັນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວ ມີສະຕິກຳກັບໃນຄວາມສັນໂດດດ້ວຍຈີວອນນັ້ນ ພິກຂຸນີ້ຕັດຮຽກວ່າ ດຳຣົງຢູ່ໃນອະຣິຍະວົງ ທີ່ຮູ້ກັນວ່າດີເລີດ ເປັນຂອງເກົ່າ

ອີກໄນໜຶ່ງ ພິກຂຸເປັນຜູ້ສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງບິນທະບາດ ບໍ່ໄດ້ບິນທະບາດກໍບໍ່ກະວົນກະວາຍ ແລະ ໄດ້ບິນທະ ບາດແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດ ມີປັນຍາເຄື່ອງສະລັດອອກ ບໍຣິໂພກຢູ່ ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍບິນທະບາດຕາມມີຕາມໄດ້ນັ້ນ ທ່ານຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນພິກຂຸໃດຂະຫຍັນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວ ມີສະຕິກຳກັບໃນຄວາມສັນໂດດດ້ວຍບິນທະບາດນັ້ນ ພິກຂຸນີ້ຕັດຮຽກວ່າ ດຳຣົງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າ ດີເລີດ ເປັນຂອງເກົ່າ

ອີກໄນໜຶ່ງ ພິກຂຸເປັນຜູ້ສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງເສນາສະນະ ບໍ່ໄດ້ເສນາສະນະກໍບໍ່ກະວົນກະວາຍ ແລະ ໄດ້ເສນາສະນະແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດ ມີປັນຍາເຄື່ອງສະລັດອອກ ໃຊ້ສອຍ ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້ນັ້ນ ທ່ານຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນພິກຂຸໃດຂະຫຍັນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວ ມີສະຕິກຳກັບໃນຄວາມສັນໂດດ ດ້ວຍ ເສນາສະນະນັ້ນ ພິກຂຸນີ້ຕັດຮຽກວ່າ ດຳຣົງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າດີເລີດ ເປັນຂອງເກົ່າ

ອີກໄນໜຶ່ງ ພິກຂຸເປັນຜູ້ສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ແລະ ກ່າວສັນເສີນຄວາມສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດທີ່ບໍ່ສົມຄວນ ຍ້ອນເຫດແຫ່ງຄິລານະປັດໄຈເພສັດບໍຣິຂານ ບໍ່ໄດ້ ຄິລານະປັດໄຈເພສັດບໍຣິຂານກໍບໍ່ກະວົນກະວາຍ ແລະ ໄດ້ຄິລານະປັດໄຈເພສັດບໍຣິຂານແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດ ມີປັນຍາເຄື່ອງສະລັດອອກ ບໍຣິໂພກຢູ່ ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ນັ້ນ ທ່ານຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ຍ້ອນພິກຂຸໃດຂະຫຍັນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວ ມີສະຕິກຳກັບໃນຄວາມສັນໂດດ ດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ນັ້ນ ພິກຂຸນີ້ຕັດຮຽກວ່າ ດຳຣົງຢູ່ໃນອະຣິຍະວົງ ທີ່ຮູ້ກັນວ່າດີເລີດ ເປັນຂອງເກົ່າ ລວມຄວາມວ່າ ພິກຂຸນັ້ນໃນທຳວິໄນນີ້ ໗ລ໗ ເພິ່ງຮູ້ຈັກປະມານ ເພື່ອສັນໂດດ

ຄຳວ່າ ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ ໃນຄຳວ່າ ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ ເປັນຜູ້ສັງລວມທ່ຽວໄປໃນໝູ່ບ້ານ ອະທິບາຍວ່າ ພິກຂຸນັ້ນ ຄຸ້ມຄອງ ຄື ປົກປັກ ຮັກສາ ສັງວອນໃນຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ລວມຄວາມວ່າ ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ ແນວນີ້ແດ່

ອີກໄນໜຶ່ງ ພິກຂຸນັ້ນຄຸ້ມຄອງ ຄື ປົກປັກ ຮັກສາ ສັງວອນໃນອາຍະຕະນະທັງຫຼາຍ ລວມຄວາມວ່າ ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ ແນວນີ້ແດ່

ຄຳວ່າ ເປັນຜູ້ສັງລວມທ່ຽວໄປໃນໝູ່ບ້ານ ອະທິບາຍວ່າ ເປັນຜູ້ສັງລວມ ຄື ຣະວັງ ຣະມັດຣະວັງ ຄຸ້ມຄອງ ປົກປັກ ຮັກສາ ສັງວອນ ທ່ຽວໄປໃນໝູ່ບ້ານ ລວມຄວາມວ່າ ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ ເປັນຜູ້ສັງລວມທ່ຽວໄປໃນໝູ່ບ້ານ

ຄຳວ່າ ແມ່ນຖືກດ່າກໍບໍ່ເພິ່ງກ່າວວາຈາຫຍາບ ອະທິບາຍວ່າ ຖືກປະທຸດສະຮ້າຍ ຖືກດ່າ ຄື ຖືກສຽດສີ ຖືກຢຽດຢາມ ຖືກຕິຕຽນ ຖືກວ່າຮ້າຍ ກໍບໍ່ເພິ່ງວ່າກ່າວຕອບຜູ້ທີ່ວ່າກ່າວ ບໍ່ເພິ່ງດ່າຕອບຜູ້ທີ່ດ່າ ບໍ່ເພິ່ງໂກດຕອບຜູ້ທີ່ໂກດ ບໍ່ເພິ່ງໝາງໃຈຕອບຜູ້ທີ່ໝາງໃຈ ດ້ວຍຖ້ອຍຄຳຫຍາບຄຳເວົ້າກະດ້າງ ໄດ້ແກ່ ບໍ່ເພິ່ງກໍ່ການຜິດຖຽງ ບໍ່ເພິ່ງກໍ່ການໝາງໃຈ ບໍ່ເພິ່ງກໍ່ການຍາດແຍ່ງ ບໍ່ເພິ່ງກໍ່ການວິວາດ ບໍ່ເພິ່ງກໍ່ການມຸ້ງຮ້າຍ ຄື ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການຜິດຖຽງ ການໝາງໃຈ ການຍາດແຍ່ງ ການວິວາດ ການມຸ້ງຮ້າຍ ໄດ້ແກ່ ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ບໍ່ກ່ຽວຂ້ອງ ຫຼຸດພົ້ນຈາກການຜິດຖຽງ ການໝາງໃຈ ການຍາດແຍ່ງ ການວິວາດ ການມຸ້ງຮ້າຍ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ແມ່ນຖືກດ່າກໍບໍ່ເພິ່ງກ່າວວາຈາຫຍາບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸນັ້ນໃນທຳວິໄນນີ້  
ໄດ້ອາຫານ ແລະ ເຄື່ອງນຸ່ງຫົ່ມໃນການແລ້ວ  
ເພິ່ງຮູ້ຈັກປະມານເພື່ອສັນໂດດ  
ພິກຂຸນັ້ນຄຸ້ມຄອງໃນປັດໄຈເຫຼົ່ານັ້ນ  
ເປັນຜູ້ສັງລວມທ່ຽວໄປໃນໝູ່ບ້ານ  
ແມ່ນຖືກດ່າກໍບໍ່ເພິ່ງກ່າວວາຈາຫຍາບຊ້າ

[໔໐໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸເພິ່ງເປັນຜູ້ບໍ່ສອດສ່າຍຈັກຂຸ  
ແລະ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ  
ເພິ່ງເປັນຜູ້ຂວນຂວາຍໃນຊານ ຕື່ນຢູ່ສ່ວນຫຼາຍ  
ພາຣົບອຸເປກຂາ ມີຈິດຕັ້ງໝັ້ນ ເພິ່ງເຂົ້າໄປຕັດຄວາມນຶກຄິດ

ທີ່ອາໄສຄວາມນຶກ ແລະ ຄວາມຄະນອງ

ຄຳວ່າ ພິກຂຸເພິ່ງເປັນຜູ້ບໍ່ສອດສ່າຍຈັກຂຸ ແລະບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ

ພິກຂຸເປັນຜູ້ສອດສ່າຍຈັກຂຸ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ເປັນຜູ້ມີຕາລັອກແລັກ ຄື ເປັນຜູ້ປະກອບດ້ວຍຄວາມເປັນຄົນມີຕາລັອກແລັກດ້ວຍຄິດວ່າ ຮູບທີ່ຍັງບໍ່ເຄີຍເບິ່ງ ເຮົາຄວນເບິ່ງ ຮູບທີ່ເຮົາເຄີຍເບິ່ງແລ້ວຄວນຜ່ານໄປເລີຍ ຈຶ່ງເປັນຜູ້ຂວນຂວາຍການທ່ຽວໄປດົນນານ ແລະການທ່ຽວໄປບໍ່ແນ່ນອນຈາກອາຮາມໜຶ່ງໄປສູ່ອີກອາຮາມໜຶ່ງ ຈາກອຸທະຍານໜຶ່ງໄປສູ່ອີກອຸທະຍານໜຶ່ງ ຈາກບ້ານໜຶ່ງໄປສູ່ອີກບ້ານໜຶ່ງ ຈາກນິຄົມໜຶ່ງໄປສູ່ອີກນິຄົມໜຶ່ງ ຈາກນະຄອນໜຶ່ງໄປສູ່ອີກນະຄອນໜຶ່ງ ຈາກຣັດໜຶ່ງໄປສູ່ອີກຣັດໜຶ່ງ ຈາກຊົນນະບົດ (ປະເທດ) ໜຶ່ງໄປສູ່ອີກຊົນນະ ບົດໜຶ່ງ ເພື່ອເບິ່ງຮູບ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຂົ້າສູ່ບໍລິເວນເຮືອນ ຍ່າງໄປຕາມຖະໜົນບໍ່ສັງລວມ ຍ່າງແນມເບິ່ງຊ້າງ ເບິ່ງມ້າ ເບິ່ງລົດ ເບິ່ງພົນຍ່າງ ເບິ່ງສະຕີ ເບິ່ງບຸຣຸດ ເບິ່ງເດັກຊາຍ ເບິ່ງເດັກຍິງ ເບິ່ງຮ້ານຕະຫຼາດ ເບິ່ງໜ້າມຸກເຮືອນ ເບິ່ງຂ້າງເທິງ ເບິ່ງຂ້າງລຸ່ມ ເບິ່ງທິດນ້ອຍທິດໃຫຍ່ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ເປັນຜູ້ລວບຖື ເປັນຜູ້ແຍກຖື (ອະໄວຍະວະສ່ວນຕ່າງ ໆ) ຍ່ອມບໍ່ປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາ ແລະ ໂທມະນັດຄອບງຳໄດ້ ຍ່ອມບໍ່ຮັກສາຈັກຂຸນຊີ ຍ່ອມບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ຂວນຂວາຍເບິ່ງການລະຫຼິ້ນ ອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ເໝືອນສະມະນະພາມຜູ້ຈະເລີນບາງພວກ ບໍຣິໂພກອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ຄື ການຟ້ອນ ການຂັບຮ້ອງ ການເສບດົນຕີ ການເບິ່ງມະໂຫລະສົບ ການເລົ່ານິທານ ການຫຼິ້ນຕົບມື ການຫຼິ້ນປຸກຜີ ການຫຼິ້ນຕີກອງ ການສ້າງສາກບ້ານເມືອງໃຫ້ສວຍງາມ ການລະຫຼິ້ນຂອງຄົນຈັນທານ ການຫຼິ້ນແປ້ນໂຍກ ການລະຫຼິ້ນໜ້າສົບ ການແຂ່ງຊົນຊ້າງ ການແຂ່ງມ້າ ການແຂ່ງຊົນຄວາຍ ການແຂ່ງຊົນງົວ ການແຂ່ງຊົນແບ້ ການແຂ່ງຊົນແກະ ການແຂ່ງຕີໄກ່ ການແຂ່ງຕີນົກກະທາ ການຣຳກະບີ່ກະບອງ ການຊົກມວຍປ້ຳ ການຣົບ ການກວດພົນສວນສະໜາມ ການຈັດກະບວນທັບ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ພິກຂຸບໍ່ເປັນຜູ້ສອດສ່າຍຈັກຂຸ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ບໍ່ເປັນຜູ້ມີຕາລັອກແລັກ ຄື ບໍ່ເປັນຜູ້ປະກອບດ້ວຍຄວາມເປັນຄົນມີຕາລັອກແລັກດ້ວຍຄິດວ່າ ຮູບທີ່ຍັງບໍ່ເຄີຍເບິ່ງ ເຮົາຄວນເບິ່ງ ຮູບທີ່ເຮົາເຄີຍເບິ່ງແລ້ວຄວນຜ່ານໄປເລີຍ ຈຶ່ງບໍ່ເປັນຜູ້ຂວນຂວາຍການທ່ຽວໄປດົນນານ ແລະ ການທ່ຽວໄປບໍ່ແນ່ນອນ ຈາກອາຣາມໜຶ່ງໄປສູ່ອີກອາຣາມໜຶ່ງ ຈາກອຸທະຍານໜຶ່ງໄປສູ່ອີກອຸທະຍານໜຶ່ງ ຈາກບ້ານໜຶ່ງໄປສູ່ອີກບ້ານໜຶ່ງ ຈາກນິຄົມໜຶ່ງໄປສູ່ອີກນິຄົມໜຶ່ງ ຈາກນະຄອນໜຶ່ງໄປສູ່ອີກນະຄອນໜຶ່ງ ຈາກຣັດໜຶ່ງໄປສູ່ອີກຣັດໜຶ່ງ ຈາກຊົນນະບົດ (ປະເທດ) ໜຶ່ງໄປສູ່ອີກຊົນນະບົດໜຶ່ງ ເພື່ອເບິ່ງຮູບ ພິກຂຸຊື່ວ່າບໍ່ເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຂົ້າສູ່ບໍລິເວນເຮືອນ ຍ່າງໄປຕາມຖະໜົນກໍສັງລວມ ບໍ່ຍ່າງແນມເບິ່ງຊ້າງ ໆລໆ ບໍ່ແນມເບິ່ງທິດນ້ອຍທິດໃຫຍ່ ພິກຂຸຊື່ວ່າບໍ່ເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ບໍ່ລວບຖື ໆລໆ ຍ່ອມເຖິງຄວາມສັງລວມໃນຈັກຂຸນຊີ ພິກຂຸຊື່ວ່າບໍ່ເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ງົດເວັ້ນຈາກການຂວນຂວາຍໃນການເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ເໝືອນສະມະນະພາມຜູ້ຈະເລີນບາງພວກບໍຣິໂພກອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ກໍບໍ່ຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ຄື ໆລໆ ການຈັດກະບວນທັບ ພິກຂຸຊື່ວ່າບໍ່ເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່ ລວມຄວາມວ່າ ພິກຂຸເພິ່ງເປັນຜູ້ບໍ່ສອດສ່າຍຈັກຂຸ

ຄຳວ່າ ແລະ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ

ພິກຂຸເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ເປັນຜູ້ມີຕີນຢູ່ບໍ່ສຸກ ຄື ປະກອບດ້ວຍຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ຈຶ່ງເປັນຜູ້ຂວນຂວາຍໃນການທ່ຽວໄປດົນນານ ການທ່ຽວໄປບໍ່ມີຈຸດໝາຍແນ່ນອນ ຈາກອາຣາມໜຶ່ງໄປສູ່ອີກອາຣາມໜຶ່ງ ໆລໆ ເພື່ອເບິ່ງຮູບ ພິກຂຸຊື່ວ່າເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ມີຕີນຢູ່ບໍ່ສຸກ ຄື ປະກອບດ້ວຍຄວາມເປັນຜູ້ມີຕີນຢູ່ບໍ່ສຸກພາຍໃນສັງຄາຣາມ ບໍ່ແມ່ນຍ້ອນເຫດແຫ່ງປະໂຫຍດ ບໍ່ແມ່ນຍ້ອນເຫດແຫ່ງການກະທຳ ແຕ່ເປັນຜູ້ ຟຸ້ງຊ່ານ ມີຈິດໃຈບໍ່ສະງົບ ຍ່າງຈາກບໍລິເວນໜຶ່ງໄປສູ່ອີກບໍລິເວນໜຶ່ງ ຈາກວິຫານໜຶ່ງໄປສູ່ອີກວິຫານໜຶ່ງ ໆລໆ ເວົ້າເລື້ອງຄວາມຈະເລີນ ແລະ ຄວາມເສື່ອມ ດັ່ງນີ້ ພິກຂຸຊື່ວ່າເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວນີ້ແດ່

ຄຳວ່າ ແລະ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ ເພິ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ມີໃຈເປັນອິດສະຫຼະ (ຈາກ

ກິເລດ) ຢູ່ ໄດ້ແກ່ ເພິ່ງເປັນຜູ້ພໍໃຈໃນຄວາມຫຼີກຫຼີກ ຍິນດີໃນຄວາມຫຼີກຫຼີກ ໝັ່ນປະກອບຄວາມສະຫງົບແຫ່ງຈິດພາຍໃນ ບໍ່ເຫີນຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນການຢູ່ໃນເຮືອນວ່າງ ມີຊານ ເປັນຜູ້ຍິນດີໃນຊານ ຂວນຂວາຍໃນຄວາມເປັນຜູ້ມີຈິດ ມີອາລົມໜຶ່ງດຽວໜັກໃນປະໂຫຍດຂອງຕົນ ລວມຄວາມວ່າ ພິກຂຸເພິ່ງເປັນຜູ້ບໍ່ສອດສ່າຍຈັກຂຸ ແລະ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ

ຄຳວ່າ ເພິ່ງເປັນຜູ້ຂວນຂວາຍໃນຊານ ໃນຄຳວ່າ ເພິ່ງເປັນຜູ້ຂວນຂວາຍໃນຊານ ຕື່ນຢູ່ສ່ວນຫຼາຍ ອະທິບາຍວ່າ ເພິ່ງເປັນຜູ້ຂວນຂວາຍໃນຊານ ດ້ວຍເຫດ ໒ ຢ່າງ ຄື

໑. ພິກຂຸເປັນຜູ້ປະກອບ ຄື ຂວນຂວາຍ ມຸ້ງໝັ້ນ ມຸ້ງໝັ້ນສະເໝີເພື່ອເຮັດປະຖົມຊານ ທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ເປັນຜູ້ປະກອບ ຂວນຂວາຍ ມຸ້ງໝັ້ນ ມຸ້ງໝັ້ນສະເໝີ ເພື່ອເຮັດທຸຕິຍະຊານທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຯລຯ ເພື່ອເຮັດຕະຕິຍະຊານທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຯລຯ ເພື່ອເຮັດຈະຕຸດຖະຊານທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ລວມຄວາມວ່າ ເພິ່ງເປັນຜູ້ຂວນຂວາຍໃນຊານ ເປັນແນວນີ້ແດ່

໒. ພິກຂຸຊ້ອງເສບ ຈະເລີນ ເຮັດໃຫ້ຫຼາຍ ເຊິ່ງປະຖົມຊານທີ່ເກີດຂຶ້ນແລ້ວ ຊ້ອງເສບ ຈະເລີນ ເຮັດໃຫ້ຫຼາຍ ເຊິ່ງທຸຕິຍະຊານທີ່ເກີດຂຶ້ນແລ້ວ ຯລຯ ຕະຕິຍະຊານທີ່ເກີດຂຶ້ນແລ້ວ ຯລຯ ຈະຕຸດຖະຊານທີ່ເກີດຂຶ້ນແລ້ວ ລວມຄວາມວ່າ ເພິ່ງເປັນຜູ້ຂວນຂວາຍໃນຊານ ເປັນແນວ ນີ້ແດ່

ຄຳວ່າ ຕື່ນຢູ່ສ່ວນຫຼາຍ ອະທິບາຍວ່າ ພິກຂຸໃນທຳວິໄນນີ້ ຊຳຮະຈິດໃຫ້ບໍລິສຸດຈາກ ທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມ ແລະ ການນັ່ງຕະຫຼອດວັນ ຄື ຊຳຮະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມ ແລະ ການນັ່ງຕະຫຼອດປະຖົມຍາມແຫ່ງຣາຕີ ສຳເລັດການນອນຢ່າງຣາດຊະສີ ໂດຍຕະແຄງດ້ານຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳ ປະຊັນຍະ ກຳນົດເວລາຕື່ນໄວ້ໃນໃຈ ຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນແລ້ວຊຳຮະ ຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຍ່າງຈົງກົມ ແລະ ການນັ່ງຕະຫຼອດປັດສິມຍາມແຫ່ງຣາຕີ ລວມຄວາມວ່າ ເພິ່ງເປັນຜູ້ຂວນຂວາຍໃນຊານ ຕື່ນຢູ່ສ່ວນຫຼາຍ

ຄຳວ່າ ພາຣົບອຸເປກຂາ ມີຈິດຕັ້ງໝັ້ນ ອະທິບາຍວ່າ

ຄຳວ່າ ອຸເປກຂາ ໄດ້ແກ່ ອຸເປກຂາ ຄື ຄວາມເພີກເສີຍ ຄວາມເພີກເສີຍຢ່າງຍິ່ງ ຄວາມທີ່ຈິດສະຫງົບ ຄວາມທີ່ຈິດສະຫງັດ ຄວາມທີ່ຈິດເປັນກາງໃນຈະຕຸດຖະຊານ

ຄຳວ່າ ມີຈິດຕັ້ງໝັ້ນ ໄດ້ແກ່ ຄວາມຕັ້ງໝັ້ນ ຄວາມດຳຣົງໝັ້ນ ຄວາມບໍ່ຄອນແຄນ ຄວາມບໍ່ກວັດແກວ່ງ ຄວາມບໍ່ຟຸ້ງຊ່ານແຫ່ງຈິດ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ

ຄຳວ່າ ຜາຣົບອຸເປກຂາ ມີຈິດຕັ້ງໝັ້ນ ອະທິບາຍວ່າ ຜາຣົບອຸເປກຂາໃນຈະຕຸດຖະຊານ ມີຈິດມີອາລົມເປັນໜຶ່ງດຽວ ມີຈິດບໍ່ຟຸ້ງຊ່ານ ມີໃຈບໍ່ຊັດສ່າຍ ລວມຄວາມວ່າ ຜາຣົບອຸເປກຂາ ມີຈິດຕັ້ງໝັ້ນ

## ວ່າດ້ວຍຄວາມນຶກ ໙ ຢ່າງ

ຄຳວ່າ ຄວາມນຶກ ໃນຄຳວ່າ ເພິ່ງເຂົ້າໄປຕັດຄວາມນຶກທຳທີ່ອາໄສຄວາມນຶກ ແລະ ຄວາມຄະນອງ ໄດ້ແກ່ ຄວາມນຶກ ໙ ຢ່າງ ຄື

໑. ຄວາມນຶກໃນກາມ
໒. ຄວາມນຶກໃນຄວາມພະຍາບາດ
໓. ຄວາມນຶກໃນຄວາມບຽດບຽນ
໔. ຄວາມນຶກເຖິງຍາດພີ່ນ້ອງ
໕. ຄວາມນຶກເຖິງຊົນນະບົດ
໖. ຄວາມນຶກເຖິງເທບພະເຈົ້າ
໗. ຄວາມນຶກກ່ຽວເນື່ອງດ້ວຍຄວາມເປັນຜູ້ອີດູຜູ້ອື່ນ
໘. ຄວາມນຶກກ່ຽວເນື່ອງດ້ວຍລາບສັກກາຣະ ແລະ ຄວາມສັນເສີນ
໙. ຄວາມນຶກກ່ຽວເນື່ອງດ້ວຍຄວາມບໍ່ຖືກດູໝິ່ນ

ເຫຼົ່ານີ້ຮຽກວ່າ ຄວາມນຶກ ໙ ຢ່າງ

ກາມສັນຍາເປັນບ່ອນອາໄສແຫ່ງກາມວິຕົກ ພະຍາບາດສັນຍາເປັນບ່ອນອາໄສແຫ່ງພະຍາບາດວິຕົກ ວິຫິງສາສັນຍາເປັນບ່ອນອາໄສແຫ່ງວິຫິງສາວິຕົກ

ອີກໄນໜຶ່ງ ອະວິດຊາ ອະໂຍນິໂສມະນະສິການ ອັດສະມິມານະ ອະໂນດຕັບປະ ແລະ ອຸດທັດຈະ ເປັນບ່ອນອາໄສແຫ່ງວິຕົກ ຄື ຄວາມນຶກ ຄວາມດຳຣິທັງຫຼາຍ

ຄຳວ່າ ຄວາມຄະນອງ ອະທິບາຍວ່າ ຄວາມຄະນອງມື ຊື່ວ່າຄວາມຄະນອງ ຄວາມຄະນອງຕີນ ຊື່ວ່າຄວາມຄະນອງ ຄວາມຄະນອງມື ແລະ ຕີນ ກໍຊື່ວ່າຄວາມຄະນອງ ຄວາມສຳຄັນໃນສິ່ງທີ່ບໍ່ຄວນວ່າຄວນ ຄວາມສຳຄັນໃນສິ່ງທີ່ຄວນວ່າບໍ່ຄວນ ຄວາມສຳຄັນໃນສິ່ງທີ່ບໍ່ມີໂທດວ່າມີໂທດ ຄວາມສຳຄັນໃນສິ່ງທີ່ມີໂທດວ່າບໍ່ມີໂທດ ຄວາມຄະນອງ ກິຣິຍາທີ່ຄະນອງ ພາວະທີ່ຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຄະນອງ

ອີກໄນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຫດ ໒ ຢ່າງ ຄື (໑) ຍ້ອນເຮັດ (໒) ຍ້ອນບໍ່ເຮັດ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານເກີດຂຶ້ນຍ້ອນເຮັດ ແລະ ຍ້ອນບໍ່ເຮັດ ເປັນແນວໃດ?

ຄື ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາເຮັດແຕ່ກາຍທຸດຈະຣິດ ບໍ່ເຮັດກາຍສຸດຈະຣິດ ຯລຯ ເຮົາເຮັດແຕ່ວະຈີທຸດຈະຣິດ ບໍ່ເຮັດວະຈີສຸດຈະຣິດ ຯລຯ ເຮົາເຮັດແຕ່ມະໂນທຸດຈະຣິດ ບໍ່ເຮັດມະໂນສຸດຈະຣິດ ຯລຯ ເຮົາເຮັດແຕ່ປານາຕິບາດ ບໍ່ເຮັດຄວາມງົດເວັ້ນຈາກປານາຕິບາດ ຯລຯ ເຮົາເຮັດແຕ່ອະທິນນາທານ ບໍ່ເຮັດຄວາມງົດເວັ້ນຈາກອະທິນນາທານ ຯລຯ ເຮົາເຮັດແຕ່ກາເມສຸມິດສາຈານ ບໍ່ເຮັດຄວາມງົດເວັ້ນຈາກກາເມສຸມິດສາຈານ ຯລຯ ເຮົາເຮັດແຕ່ມຸສາວາດ ບໍ່ເຮັດຄວາມງົດເວັ້ນຈາກມຸສາວາດ ຯລຯ ເຮົາເຮັດແຕ່ປິສຸນາວາຈາ ບໍ່ເຮັດຄວາມງົດເວັ້ນຈາກປິສຸນາວາຈາ ຯລຯ ເຮົາເຮັດແຕ່ຜະຣຸສະວາຈາ ບໍ່ເຮັດຄວາມງົດເວັ້ນຈາກຜະຣຸສະວາຈາ ຯລຯ ເຮົາເຮັດແຕ່ສຳຜັບປະລາປະ ບໍ່ເຮັດຄວາມງົດເວັ້ນຈາກສຳຜັບປະລາປະ ຯລຯ ເຮົາເຮັດແຕ່ອະພິດຊາ ບໍ່ເຮັດອະນະພິດຊາ ຯລຯ ເຮົາເຮັດແຕ່ພະຍາບາດ ບໍ່ເຮັດອັບພະຍາບາດ ຯລຯ ເຮົາເຮັດແຕ່ມິດສາທິດຖິ ບໍ່ເຮັດສຳມາທິດຖິ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນ ຍ້ອນເຮັດ ແລະ ຍ້ອນບໍ່ເຮັດ ເປັນແນວນີ້

ອີກໄນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາບໍ່ໄດ້ຮັກສາສິນໃຫ້ບໍລິບູນ ຯລຯ ເຮົາບໍ່ສັງລວມໃນອິນຊີທັງ ໖ ຯລຯ ບໍ່ຮູ້ຈັກປະມານໃນການບໍຣິໂພກອາຫານ ຯລຯ ບໍ່ປະກອບຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ຯລຯ ບໍ່ໝັ່ນປະກອບດ້ວຍສະຕິສຳປະຊັນຍະ ຯລຯ ບໍ່ຈະເລີນສະຕິປັດຖານ ໔ ຯລຯ ບໍ່ຈະເລີນສຳມັບປະທານ ໔ ຯລຯ ບໍ່ຈະເລີນ ອິດທິບາດ ໔ ຯລຯ ບໍ່ຈະເລີນອິນຊີ ໕ ຯລຯ ບໍ່ຈະເລີນພະລະ ໕ ຯລຯ ບໍ່ຈະເລີນໂພດຊົງ ໗ ຯລຯ ບໍ່ຈະເລີນອະຣິຍະມັກມີອົງ ໘ ຯລຯ ບໍ່ກຳນົດຮູ້ທຸກ ຯລຯ ບໍ່ລະທຸກຂະສະມຸໄທ ຯລຯ ບໍ່ຈະເລີນ ມັກ ຯລຯ ເຮົາບໍ່ເຮັດນິໂຣດ ໃຫ້ປະຈັກແຈ້ງ

ຄຳວ່າ ເພິ່ງເຂົ້າໄປຕັດຄວາມນຶກທຳທີ່ອາໄສຄວາມນຶກ ແລະ ຄວາມຄະນອງ ອະທິບາຍວ່າ ເພິ່ງເຂົ້າໄປຕັດ ຄື ຕັດ ຖອນ ເພີກຖອນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມນຶກທຳທີ່ອາໄສຄວາມນຶກ ແລະ ຄວາມຄະນອງ ລວມຄວາມວ່າ ເພິ່ງເຂົ້າໄປຕັດຄວາມນຶກທຳທີ່ອາໄສຄວາມນຶກ ແລະ ຄວາມຄະນອງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸເພິ່ງເປັນຜູ້ບໍ່ສອດສ່າຍຈັກຂຸ
ແລະ ບໍ່ເພິ່ງເປັນຜູ້ມີຕີນຢູ່ບໍ່ສຸກ
ເພິ່ງເປັນຜູ້ຂວນຂວາຍໃນຊານ ຕື່ນຢູ່ສ່ວນຫຼາຍ
ຜາຣົບອຸເປກຂາ ມີຈິດຕັ້ງໝັ້ນ ເພິ່ງເຂົ້າໄປຕັດຄວາມນຶກທຳ
ທີ່ອາໄສຄວາມນຶກ ແລະ ຄວາມຄະນອງ

[໔໐໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ພິກຂຸຜູ້ຖືກຕັກເຕືອນດ້ວຍວາຈາ ເພິ່ງມີສະຕິຊື່ນຊົມ
ທຳລາຍຄວາມແຂງກະດ້າງໃນໝູ່ພົມມະຈາຣີ

ເພິ່ງເປ່ງວາຈາເປັນກຸສົນ ບໍ່ເພິ່ງເປ່ງວາຈາເກີນຂອບເຂດ
ບໍ່ເພິ່ງຄິດຫາເລື້ອງທີ່ຈະວ່າກ່າວຄົນອື່ນ

ຄຳວ່າ ຜູ້ຖືກຕັກເຕືອນ ໃນຄຳວ່າ ພິກຂຸຜູ້ຖືກຕັກເຕືອນດ້ວຍວາຈາ ເພິ່ງມີສະຕິຊື່ນຊົມ ອະທິບາຍວ່າ ອຸປັດຊາ ອາຈານ ຜູ້ຮ່ວມອຸປັດຊາ ຜູ້ຮ່ວມອາຈານ ມິດ ໝູ່ທີ່ເຫັນ ໝູ່ທີ່ຄົບ ຫຼື ສະຫາຍຕັກເຕືອນວ່າ ຜູ້ມີອາຍຸ ການກະທຳຂອງທ່ານນີ້ບໍ່ຄວນ ການກະທຳນີ້ ຍັງບໍ່ເຖິງແກ່ທ່ານ ການກະທຳຂອງທ່ານນີ້ ບໍ່ສົມຄວນ ການກະທຳຂອງທ່ານນີ້ ບໍ່ເໝາະສົມ ກໍເພິ່ງມີສະຕິ ພໍໃຈ ເບີກບານໃຈ ອະນຸໂມທະນາ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງຄຳຕັກເຕືອນນັ້ນ ປຽບເໝືອນ ສະຕີ ຫຼື ບຸຣຸດທີ່ຍັງໜຸ່ມ ຍັງສາວ ມັກແຕ່ງຕົວ ອາບນ້ຳດຳຫົວແລ້ວ ໄດ້ມາໄລດອກບົວ ມາໄລດອກມະລິ ຫຼື ມາໄລດອກລຳດວນ ກໍໃຊ້ ໒ ມືຮັບໄວ້ ເອົາຂຶ້ນວາງໄວ້ເທິງຫົວ ເຊິ່ງເປັນອະໄວຍະວະສູງສຸດ ເພິ່ງພໍໃຈ ເບີກບານໃຈ ອະນຸໂມທະນາ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ສັນໃດ ພິກຂຸຜູ້ຖືກຕັກເຕືອນນັ້ນກໍເພິ່ງມີສະຕິ ພໍໃຈ ເບີກບານໃຈ ອະນຸໂມທະນາ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງຄຳຕັກເຕືອນນັ້ນ ສັນນັ້ນຄືກັນ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ບຸກຄົນເພິ່ງເຫັນຜູ້ມີປັນຍາມັກຊີ້ໂທດ
ມັກເວົ້າຫ້າມປາມໄວ້ ເໝືອນຜູ້ຊີ້ບອກຂຸມຊັບ
(ແລະ) ເພິ່ງຄົບຜູ້ທີ່ເປັນບັນດິດເຊັ່ນນັ້ນ ຍ້ອນເມື່ອຄົບຄົນເຊັ່ນນັ້ນ
ຍ່ອມມີແຕ່ຄວາມຈະເລີນບໍ່ມີຄວາມເສື່ອມເລີຍ
ຜູ້ໃດເພິ່ງກ່າວສອນ ສັ່ງສອນ ແລະ ຫ້າມຈາກຄວາມຊົ່ວ
ຜູ້ນັ້ນຍ່ອມເປັນທີ່ຮັກຂອງສັດຕະບຸຣຸດທັງຫຼາຍ
ແຕ່ບໍ່ເປັນທີ່ຮັກຂອງອະສັດຕະບຸຣຸດທັງຫຼາຍ

ຄຳວ່າ ພິກຂຸຜູ້ຖືກຕັກເຕືອນດ້ວຍວາຈາ ເພິ່ງມີສະຕິຊື່ນຊົມ ທຳລາຍຄວາມກະດ້າງໃນໝູ່ພົມມະຈາຣີ ອະທິບາຍວ່າ

ຄຳວ່າ ໝູ່ພົມມະຈາຣີ ໄດ້ແກ່ ຄົນທີ່ມີກຳ (ທາງວິໄນ) ຢ່າງດຽວກັນ ມີອຸດເທດ ຢ່າງດຽວກັນ ມີສິກຂາສະເໝີກັນ

ຄຳວ່າ ທຳລາຍຄວາມກະດ້າງໃນໝູ່ພົມມະຈາຣີ ອະທິບາຍວ່າ ເພິ່ງທຳລາຍຄວາມເປັນຜູ້ມີຈິດຖືກໂທສະກະທົບ ຄວາມເປັນຜູ້ມີຈິດກະດ້າງໃນໝູ່ພົມມະຈາຣີ ຄື ເພິ່ງທຳລາຍ ຄວາມກະດ້າງແຫ່ງຈິດ ໕ ປະການແດ່ ທຳລາຍຄວາມກະດ້າງແຫ່ງຈິດ ໓ ປະການແດ່ ໄດ້ແກ່ ເພິ່ງທຸບທຳລາຍ ກຳຈັດຄວາມກະດ້າງດ້ວຍອຳນາດຣາຄະ ຄວາມກະດ້າງດ້ວຍອຳນາດໂທສະ ຄວາມກະດ້າງດ້ວຍອຳນາດໂມຫະ ລວມຄວາມວ່າ ທຳລາຍຄວາມກະດ້າງໃນໝູ່ພົມມະຈາຣີ

ຄຳວ່າ ເພິ່ງເປ່ງວາຈາເປັນກຸສົນ ບໍ່ເພິ່ງເປ່ງວາຈາເກີນຂອບເຂດ ອະທິບາຍວ່າ ເພິ່ງເປ່ງວາຈາທີ່ເກີດຈາກຍານອັນປະກອບດ້ວຍເຫດ ປະກອບດ້ວຍຜົນ ຄື ເພິ່ງເປ່ງ ເປ່ງອອກ ເປ່ງອອກດ້ວຍດີເຊິ່ງວາຈາ ມີບ່ອນອ້າງອີງ ມີຈຸດຈົບສິ້ນ ຕາມການອັນຄວນ ລວມຄວາມວ່າ ເພິ່ງເປ່ງວາຈາເປັນກຸສົນ

ຄຳວ່າ ບໍ່ເພິ່ງເປ່ງວາຈາເກີນຂອບເຂດ ອະທິບາຍວ່າ ຂອບເຂດ ໄດ້ແກ່ ຂອບເຂດ ໒ ຢ່າງ ຄື (໑) ຂອບເຂດແຫ່ງການ (໒) ຂອບເຂດແຫ່ງສີນ

ຂອບເຂດແຫ່ງການ ເປັນແນວໃດ?

ຄື ພິກຂຸບໍ່ເພິ່ງກ່າວວາຈາເກີນການ ບໍ່ເພິ່ງກ່າວວາຈາເກີນຂອບເຂດ ບໍ່ເພິ່ງກ່າວວາຈາເກີນຂອບເຂດແຫ່ງການ ບໍ່ເພິ່ງກ່າວວາຈາທີ່ຍັງບໍ່ຮອດການ ບໍ່ເພິ່ງກ່າວວາຈາທີ່ຍັງບໍ່ເຖິງຂອບເຂດ ບໍ່ເພິ່ງກ່າວວາຈາທີ່ຍັງບໍ່ເຖິງຂອບເຂດແຫ່ງການ (ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ຜູ້ໃດ ເມື່ອຍັງບໍ່ເຖິງການອັນຄວນ ເວົ້າເກີນເວລາ
ຜູ້ນັ້ນຍ່ອມຈະຖືກຂ້າ ນອນຕາຍຢູ່
ເໝືອນລູກນົກກາເວົາທີ່ຖືກກາລັ່ງໄວ້ ສັນນັ້ນ
ນີ້ຊື່ວ່າຂອບເຂດແຫ່ງການ

ຂອບເຂດແຫ່ງສີນ ເປັນແນວໃດ?

ຄື ບຸກຄົນຜູ້ກຳໜັດ ບໍ່ຄວນກ່າວວາຈາ ຜູ້ຂັດເຄືອງ ບໍ່ຄວນກ່າວວາຈາ ຜູ້ຫຼົງ ບໍ່ຄວນກ່າວວາຈາ ບໍ່ຄວນກ່າວ ຄື ບໍ່ຄວນເວົ້າ ບໍ່ຄວນບອກ ບໍ່ຄວນສະແດງ ບໍ່ຄວນຊີ້ແຈ່ງ ການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄຳຫຍາບ ການເວົ້າເພີ້ເຈີ້ ນີ້ຊື່ວ່າຂອບເຂດແຫ່ງສີນ ລວມຄວາມວ່າ ເພິ່ງເປ່ງວາຈາເປັນກຸສົນ ບໍ່ເພິ່ງເປ່ງວາຈາເກີນຂອບເຂດ

ຄຳວ່າ ຄົນ ໃນຄຳວ່າ ບໍ່ເພິ່ງຄິດຫາເລື້ອງທີ່ຈະວ່າກ່າວຄົນ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລຶຫັດ ບັນພະຊິດ ເທວະດາ ແລະ ມະນຸດ

ພິກຂຸບໍ່ເພິ່ງຄິດ ຄື ບໍ່ເພິ່ງໃຫ້ເກີດເຈຕະນາ ບໍ່ເພິ່ງໃຫ້ເກີດຄວາມຄິດ ບໍ່ເພິ່ງໃຫ້ເກີດຄວາມດຳຣິ ບໍ່ເພິ່ງໃຫ້ເກີດມະນະສິການ ເພື່ອວ່າກ່າວ ຄື ເພື່ອວ່າຮ້າຍ ເພື່ອນິນທາ ເພື່ອຕິຕຽນ ເພື່ອຄວາມບໍ່ສັນເສີນ ເພື່ອຄວາມບໍ່ຍ້ອງຍໍຄົນ ດ້ວຍສີນວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼື ອາຊີວະວິບັດ ລວມຄວາມວ່າ ບໍ່ເພິ່ງຄິດຫາເລື້ອງທີ່ຈະວ່າກ່າວຄົນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸຜູ້ຖືກຕັກເຕືອນດ້ວຍວາຈາ ເພິ່ງມີສະຕິຊື່ນຊົມ
ທຳລາຍຄວາມກະດ້າງໃນໝູ່ພົມມະຈາຣີ
ເພິ່ງເປ່ງວາຈາເປັນກຸສົນ ບໍ່ເພິ່ງເປ່ງວາຈາເກີນຂອບເຂດ

ບໍ່ເພິ່ງຄິດຫາເລື້ອງທີ່ຈະວ່າກ່າວຄືນ

[໔໐໗] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ລຳດັບຕໍ່ໄປ ພິກຂຸເພິ່ງເປັນຜູ້ມີສະຕິ
ສຶກສາເພື່ອກຳຈັດຣາຄະເຫຼົ່າໃດ
ຣາຄະເຫຼົ່ານັ້ນ ຄື ທຸລີ ໕ ຢ່າງໃນໂລກ
ເພິ່ງກຳຈັດຣາຄະໃນຮູບ ສຽງ ກິ່ນ ຣົດ ແລະ ຜັດສະ

## ວ່າດ້ວຍທຸລີ ໕ ຢ່າງ

ຄຳວ່າ ລຳດັບ ໃນຄຳວ່າ ລຳດັບຕໍ່ໄປ ຯລຯ ຄື ທຸລີ ໕ ຢ່າງໃນໂລກ ເປັນບົດສົນທິ ເປັນຄຳເຊື່ອມບົດ ເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ລຳດັບ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ຄື ທຸລີ ໕ ຢ່າງ ໄດ້ແກ່

໑. ທຸລີທີ່ເກີດຈາກຮູບ
໒. ທຸລີທີ່ເກີດຈາກສຽງ
໓. ທຸລີທີ່ເກີດຈາກກິ່ນ
໔. ທຸລີທີ່ເກີດຈາກຣົດ
໕. ທຸລີທີ່ເກີດຈາກໂຜດຖັບພະ

ອີກໄນໜຶ່ງ (ໄດ້ແກ່ທຸລີທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ຣາຄະ ເຮົາຮຽກວ່າ ທຸລີ
ເຮົາບໍ່ຮຽກຝຸ່ນໄງ່ວ່າ ເປັນທຸລີ
ຄຳວ່າ ທຸລີນີ້ ເປັນຊື່ຂອງຣາຄະ
ບັນດິດເຫຼົ່ານັ້ນລະທຸລີນີ້ແລ້ວ
ຍ່ອມຢູ່ໃນສາດສະໜາ
ຂອງພຣະພຸດທະເຈົ້າຜູ້ປາສະຈາກທຸລີໄດ້
ໂທສະ ເຮົາຮຽກວ່າ ທຸລີ
ເຮົາບໍ່ຮຽກຝຸ່ນໄງ່ວ່າ ເປັນທຸລີ

ຄຳວ່າ ທຸລີນີ້ ເປັນຊື່ຂອງໂທສະ

ບັນດິດເຫຼົ່ານັ້ນລະທຸລີນີ້ແລ້ວ
ຍ່ອມຢູ່ໃນສາດສະໜາຂອງ

ພຣະພຸດທະເຈົ້າຜູ້ປາສະຈາກທຸລີໄດ້
ໂມຫະ ເຮົາຮຽກວ່າ ທຸລີ
ເຮົາບໍ່ຮຽກຝຸ່ນໄງ່ວ່າ ເປັນທຸລີ

ຄຳວ່າ ທຸລີນີ້ ເປັນຊື່ຂອງໂມຫະ

ບັນດິດເຫຼົ່ານັ້ນລະທຸລີນີ້ແລ້ວ
ຍ່ອມຢູ່ໃນສາດສະໜາ
ຂອງພຣະພຸດທະເຈົ້າຜູ້ປາສະຈາກທຸລີໄດ້

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ລຳດັບຕໍ່ໄປ ຯລຯ ຄື ທຸລີ ໕ ຢ່າງໃນໂລກ

ຄຳວ່າ ຣາຄະເຫຼົ່າໃດ ໃນຄຳວ່າ ພິກຂຸເພິ່ງເປັນຜູ້ມີສະຕິສຶກສາເພື່ອກຳຈັດຣາຄະເຫຼົ່າໃດ ໄດ້ແກ່ ຣາຄະໃນຮູບ ຣາຄະໃນສຽງ ຣາຄະໃນກິ່ນ ຣາຄະໃນຣົດ ຣາຄະໃນໂຜດຖັບພະ

ຄຳວ່າ ມີສະຕິ ໄດ້ແກ່ ສະຕິ ຄື ຄວາມຕາມຣະນຶກເຖິງ ຄວາມຣະນຶກໄດ້ສະເພາະ ໜ້າ ສະຕິ ຄື ຄວາມຣະນຶກໄດ້ ຄວາມຈຳໄດ້ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ຄື ສະຕິນຊີ ສະຕິພະລະ ສຳມາສະຕິ ສະຕິສຳໂພດຊົງ ເອກາຍະນະມັກ ນີ້ຕັດຮຽກວ່າ ສະຕິ

ພິກຂຸປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍສະຕິນີ້ ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ມີສະຕິ

ຄຳວ່າ ເພິ່ງສຶກສາ ໄດ້ແກ່ ສິກຂາ ໓ ຄື

໑. ອະທິສີລະສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ

ອະທິສີລະສິກຂາ ເປັນແນວໃດ? ຯລຯ ນີ້ຊື່ວ່າອະທິປັນຍາສິກຂາ

ຄຳວ່າ ພິກຂຸເພິ່ງເປັນຜູ້ມີສະຕິສຶກສາ ເພື່ອກຳຈັດຣາຄະເຫຼົ່າໃດ ອະທິບາຍວ່າ ບຸກຄົນຜູ້ມີສະຕິເພິ່ງສຶກສາທັງອະທິສີລະສິກຂາ ອະທິຈິດຕະສິກຂາ ແລະ ອະທິປັນຍາສິກຂາ ເພື່ອກຳຈັດ ຄື ບັນເທົາ ລະ ສະງົບ ສະລັດຖິ້ມ ຣະງັບຣາຄະ ຄື ຣາຄະໃນຮູບ ຣາຄະໃນສຽງ ຣາຄະໃນກິ່ນ ຣາຄະໃນຣົດ ຣາຄະໃນໂຜດຖັບພະ

ສິກຂາ ໓ ນີ້ ເມື່ອພິກຂຸນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຊື່ວ່າເພິ່ງສຶກສາ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ກໍຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ພິກຂຸເພິ່ງເປັນຜູ້ມີສະຕິສຶກສາເພື່ອກຳຈັດຣາຄະເຫຼົ່າໃດ

ຄຳວ່າ ເພິ່ງປາບປາມຣາຄະໃນຣູບ ສຽງ ກິ່ນ ຣົດ ແລະ ຜັດສະ ອະທິບາຍວ່າ ເພິ່ງປາບປາມ ຄື ຍຶດຄອງ ຄອບງຳ ຖ້ວມທັບ ຮັດຄືງ ຍ່ຳຍີຣາຄະໃນຣູບ ສຽງ ກິ່ນ ຣົດ ໂຜດ ຖັບພະ ລວມຄວາມວ່າ ເພິ່ງປາບປາມຣາຄະໃນຣູບ ສຽງ ກິ່ນ ຣົດ ແລະ ຜັດສະ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ລຳດັບຕໍ່ໄປ ພິກຂຸເພິ່ງເປັນຜູ້ມີສະຕິ
ສຶກສາເພື່ອກຳຈັດຣາຄະເຫຼົ່າໃດ
ຣາຄະເຫຼົ່ານັ້ນ ຄື ທຸລີ ໕ ຢ່າງໃນໂລກ
ເພິ່ງປາບປາມຣາຄະໃນຣູບ ສຽງ ກິ່ນ ຣົດ ແລະ ຜັດສະ

[໘໑໐] (ພຣະຜູ້ມີພຣະພາກເຈົ້າຕັດດັ່ງນີ້)

ພິກຂຸເປັນຜູ້ມີສະຕິ ມີຈິດຫຼຸດພົ້ນດ້ວຍດີແລ້ວ
ເພິ່ງກຳຈັດຄວາມພໍໃຈໃນທຳເຫຼົ່ານີ້
ພິກຂຸນັ້ນເມື່ອກຳນົດພິຈາລະນາທຳໂດຍຊອບຕາມການ
ເປັນຜູ້ມີທຳເອກຜຸດຂຶ້ນ ເພິ່ງກຳຈັດຄວາມມືດ

ຄຳວ່າ ເຫຼົ່ານີ້ ໃນຄຳວ່າ ເພິ່ງກຳຈັດຄວາມພໍໃຈໃນທຳເຫຼົ່ານີ້ ໄດ້ແກ່ ໃນຣູບ ສຽງ ກິ່ນ ຣົດ ໂຜດຖັບພະ

ຄຳວ່າ ຄວາມພໍໃຈ ໄດ້ແກ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມມີເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດ ຄວາມຕ້ອງການ ຄວາມສະຫຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍອຳນາດຄວາມຕ້ອງການ ຫ້ວງນ້ຳ ຄື ຄວາມຕ້ອງການ ກິເລດເຄື່ອງປະກອບ ຄື ຄວາມຕ້ອງການ ກິເລດເຄື່ອງຍຶດໝັ້ນ ຄື ຄວາມຕ້ອງການ ກິເລດເຄື່ອງກັ້ນຈິດ ຄື ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນການທັງຫຼາຍ

ຄຳວ່າ ເພິ່ງກຳຈັດຄວາມພໍໃຈໃນທຳເຫຼົ່ານີ້ ໄດ້ແກ່ ເພິ່ງກຳຈັດ ຄື ຂະຈັດ ລະ ບັນເທົາເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມພໍໃຈໃນທຳເຫຼົ່ານີ້ ລວມຄວາມວ່າ ເພິ່ງກຳຈັດຄວາມພໍໃຈໃນທຳເຫຼົ່ານີ້

ຄຳວ່າ ພິກຂຸ ໃນຄຳວ່າ ພິກຂຸເພິ່ງເປັນຜູ້ມີສະຕິ ມີຈິດຫຼຸດພົ້ນດ້ວຍດີແລ້ວ ໄດ້ແກ່ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ພິກຂຸຜູ້ເປັນພຣະເສຂະ

ຄຳວ່າ ເປັນຜູ້ມີສະຕິ ໄດ້ແກ່ ສະຕິ ຄວາມຕາມຣະນຶກເຖິງ ໆລໆ ສຳມາສະຕິ ສະຕິສຳໂພດຊົງ ເອກາຍະນະມັກ ນີ້ ຕັດຣຽກວ່າ  ສະຕິ ພິກຂຸປະກອບພ້ອມດ້ວຍສະຕິນີ້ ໆລໆ ພິກຂຸນັ້ນພຣະຜູ້ມີພຣະພາກເຈົ້າຕັດຣຽກວ່າ ເປັນຜູ້ມີສະຕິ

## ວ່າດ້ວຍຈິດຫຼຸດພົ້ນ ໑໘ ຂັ້ນ

ຄຳວ່າ ພິກຂຸເພິ່ງເປັນຜູ້ມີສະຕິ ມີຈິດຫຼຸດພົ້ນດ້ວຍດີແລ້ວ ອະທິບາຍວ່າ

໑. ຈິດຂອງພິກຂຸຜູ້ບັນລຸປະຖົມຊານ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກນິວອນທັງຫຼາຍ
໒. ຈິດຂອງພິກຂຸຜູ້ບັນລຸທຸຕິຍະຊານ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກວິຕົກແລະວິຈານ
໓. ຈິດຂອງພິກຂຸຜູ້ບັນລຸຕະຕິຍະຊານ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກປີຕິ
໔. ຈິດຂອງພິກຂຸຜູ້ບັນລຸຈະຕຸດຖະຊານ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກສຸກແລະທຸກ
໕. ຈິດຂອງພິກຂຸຜູ້ບັນລຸ  ອາກາສານັນຈາຍະຕະນະສະມາບັດ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ
໖. ຈິດຂອງພິກຂຸຜູ້ບັນລຸ  ວິນຍານັນຈາຍະຕະນະສະມາບັດ ໆລໆ ຈາກອາກາສານັນຈາຍະຕະນະສັນຍາ
໗. ຈິດຂອງພິກຂຸຜູ້ບັນລຸ  ອາກິນຈັນຍາຍະຕະນະສະມາບັດ ໆລໆ ຈາກວິນຍານັນຈາຍະຕະນະສັນຍາ
໘. ຈິດຂອງພິກຂຸຜູ້ບັນລຸ  ເນວະສັນຍານາສັນຍາຍະຕະນະສະມາບັດ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກອາກິນຈັນຍາຍະຕະນະສັນຍາ
໙. ຈິດຂອງພິກຂຸຜູ້ເປັນ  ພຣະໂສດາບັນ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກ ສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ທິດຖານຸໄສ ວິຈິກິດສານຸໄສ ແລະກິເລດ ທີ່ຕັ້ງຢູ່ຝ່າຍດຽວກັບວິຈິກິດສາເປັນຕົ້ນນັ້ນ
໑໐. ຈິດຂອງພິກຂຸຜູ້ເປັນ  ພຣະສະກະທາຄາມີ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກ ກາມະຣາຄານຸໄສ ປະຕິຄານຸໄສ ຢ່າງຫຍາບ ແລະກິເລດທີ່ຕັ້ງຢູ່ໃນຝ່າຍດຽວກັບກາມະຣາຄານຸໄສເປັນຕົ້ນນັ້ນ
໑໑. ຈິດຂອງພິກຂຸຜູ້ເປັນ ພຣະອະນາຄາມີ ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກກາມະຣາຄະສັງໂຍດ ປະຕິຄະສັງໂຍດ ຢ່າງລະອຽດ ກາມະຣາຄານຸໄສ ປະຕິຄານຸໄສ ຢ່າງລະອຽດ ແລະ ກິເລດທີ່ຕັ້ງຢູ່ໃນຝ່າຍດຽວກັບກາມະຣາຄະສັງໂຍດເປັນຕົ້ນນັ້ນ
໑໒. ຈິດຂອງພິກຂຸຜູ້ເປັນ  ພຣະອະຣະຫັນ  ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກຣູປະຣາຄະອະຣູປະຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ເຫຼົ່າກິເລດທີ່ຕັ້ງຢູ່ໃນຝ່າຍດຽວກັບຣູປະຣາຄະເປັນຕົ້ນນັ້ນ ແລະ

ນິມິດທັງປວງໃນພາຍນອກ ລວມຄວາມວ່າ ພິກຂຸເປັນຜູ້ມີສະຕິ ມີຈິດຫຼຸດພົ້ນດ້ວຍດີແລ້ວ

## ວ່າດ້ວຍການແຫ່ງສະມະຖະ ແລະ ວິປັດສະນາ

ຄຳວ່າ ຕາມການ ໃນຄຳວ່າ ພິກຂຸນັ້ນເມື່ອກຳນົດພິຈາລະນາທຳໂດຍຊອບ ຕາມການ ອະທິບາຍວ່າ ເມື່ອຈິດຟຸ້ງຊ່ານ ກໍເປັນການແຫ່ງສະມະຖະ ເມື່ອຈິດຕັ້ງໝັ້ນ ກໍເປັນການແຫ່ງວິປັດສະນາ (ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ໂຍຄີໃດ ຍົກຈິດໄວ້ໃນການ (ໜຶ່ງ)
ຂົ່ມຈິດໃນອີກການໜຶ່ງ ທຳຈິດໃຫ້ບັນເທີງຕາມການ
ຕັ້ງຈິດໃຫ້ໝັ້ນໃນການເພ່ງເບິ່ງຈິດຕາມການ
ໂຍຄີນັ້ນ ຊື່ວ່າເປັນຜູ້ສະຫຼາດໃນການ
ການຍົກຈິດ ຄວນມີໃນການໃດ
ການຂົ່ມຈິດຄວນມີໃນການໃດ
ການສຳລັບກະທຳຈິດໃຫ້ບັນເທີງຄວນມີໃນການໃດ
ແລະ ການແຫ່ງສະມະຖະເປັນເຊັ່ນໃດ

ບັນດິດຍ່ອມສະແດງການສຳລັບເພ່ງເບິ່ງຈິດຂອງໂຍຄີໄວ້ແນວໃດ?

ການຍົກຈິດຄວນມີໃນເມື່ອຈິດຫຍໍ້ທໍ້ຍ່ອນ
ການຂົ່ມຈິດຄວນມີໃນເມື່ອຈິດຟຸ້ງຊ່ານ
ໂຍຄີຄວນກະທຳຈິດທີ່ເຖິງຄວາມເສົ້າໝອງໃຫ້ບັນເທີງທຸກເມື່ອ
ຈິດບັນເທີງ ບໍ່ຫຍໍ້ທໍ້ຍ່ອນ ບໍ່ຟຸ້ງຊ່ານມີໃນການໃດ
ໃນການນັ້ນກໍເປັນການແຫ່ງສະມະຖະ
ໃຈເພິ່ງຍິນດີຢູ່ພາຍໃນໂດຍອຸບາຍນີ້ເອງ
ເມື່ອໃດຈິດຕັ້ງໝັ້ນ ເມື່ອນັ້ນໂຍຄີເພິ່ງຮູ້ຈິດທີ່ຕັ້ງໝັ້ນ
ແລ້ວເພິ່ງເພ່ງເບິ່ງຈິດ
ນັກປາດຮູ້ຈັກການ ຮູ້ການ ສະຫຼາດໃນການ

ເພິ່ງກຳນົດອາລົມອັນເປັນນິມິດຂອງຈິດ ໂດຍຄວນແກ່ການແນວນີ້

ຄຳວ່າ ພິກຂຸນັ້ນເມື່ອກຳນົດພິຈາລະນາທຳໂດຍຊອບຕາມການ ອະທິບາຍວ່າ ພິກຂຸນັ້ນເມື່ອກຳນົດພິຈາລະນາທຳໂດຍຊອບວ່າ ສັງຂານທັງປວງບໍ່ທ່ຽງ

ເມື່ອກໍານົດພິຈາລະນາທໍາໂດຍຊອບວ່າ ສັງຂານທັງປວງເປັນທຸກ ຯລຯ ທໍາທັງປວງເປັນອະນັດຕາ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທໍາມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທໍາມະດາ

ຄໍາວ່າ ທໍາເອກຜຸດຂຶ້ນ ໃນຄໍາວ່າ ພິກຂຸນັ້ນ ຯລຯ ເປັນຜູ້ມີທໍາເອກຜຸດຂຶ້ນ ເພິ່ງກໍາຈັດຄວາມມືດ ອະທິບາຍວ່າ ຜູ້ມີຈິດມີອາລົມເປັນໜຶ່ງດຽວ ມີຈິດບໍ່ຟຸ້ງຊ່ານ ມີໃຈ ບໍ່ຊັດສ່າຍ ຄື ສະມະຖະ ສະມາທິນຊີ ສະມາທິພະລະ ສໍາມາສະມາທິ ລວມຄວາມວ່າ ເປັນຜູ້ມີທໍາເອກ ຜຸດຂຶ້ນ

ຄໍາວ່າ ພິກຂຸນັ້ນ ຯລຯ ເພິ່ງກໍາຈັດຄວາມມືດ ອະທິບາຍວ່າ ພິກຂຸເພິ່ງຂະຈັດ ເພິ່ງກໍາຈັດ ຄື ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມືດຍ້ອນຣາຄະ ຄວາມມືດຍ້ອນໂທສະ ຄວາມມືດຍ້ອນໂມຫະ ຄວາມມືດຍ້ອນມານະ ຄວາມມືດຍ້ອນທິດຖິ ຄວາມມືດຍ້ອນກິເລດ ຄວາມມືດຍ້ອນທຸດຈະຣິດ ອັນເຮັດໃຫ້ເປັນຄົນຕາບອດ ເຮັດໃຫ້ບໍ່ມີຈັກຂຸ ເຮັດໃຫ້ບໍ່ມີຍານ ອັນດັບປັນຍາ ເປັນໄປໃນຝັກຝ່າຍແຫ່ງຄວາມລໍາບາກ ບໍ່ເປັນໄປເພື່ອນິບພານ

ອະທິບາຍຄໍາວ່າ ພະຄະວາ

ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ເປັນຄໍາກ່າວໂດຍຄວາມເຄົາຣົບ

ອີກໄນໜຶ່ງ ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທໍາລາຍຣາຄະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທໍາລາຍໂທສະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທໍາລາຍໂມຫະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທໍາລາຍມານະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທໍາລາຍທິດຖິໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທໍາລາຍສ້ຽນໜາມໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທໍາລາຍກິເລດໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງຈໍາແນກ ແຍກແຍະ ແຈກແຈງທໍາຣັດຕະນະ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງເຮັດບ່ອນສຸດແຫ່ງພົບໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມພຣະວໍຣະກາຍແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຮົມສີນ ອົບຮົມຈິດ ອົບຮົມປັນຍາແລ້ວ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ສອຍເສນາສະນະທີ່ເປັນປ່າເລົ່າ ແລະປ່າທຶບ ອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມີສ່ວນແຫ່ງຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງອັດຖະຣົດ ທຳມະຣົດ ວິມຸດຕິຣົດ ອະທິສີນ ອະທິຈິດ ອະທິປັນຍາ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຊານ ໔ ອັບປະມັນຍາ ໔ ອະຣູປະສະມາບັດ ໔ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງວິໂມກ ໘ ອະພິພາຍະຕະນະ ໘ ອະນຸປຸບພະວິຫາຣະສະມາບັດ ໙ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສັນຍາພາວະນາ ໑໐ ກະສິນສະມາບັດ ໑໐ ອານາປານະສະຕິສະມາທິ ອະສຸພະສະມາບັດ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ຊົງເປັນຜູ້ມີສ່ວນແຫ່ງຕະຖາຄະຕະພະລະຍານ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ພະນາມວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງ ບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດ ແລະ ອຳມາດຕັ້ງ ບໍ່ແມ່ນພຣະຍາດພີ່ນ້ອງ ແລະ ຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນວິໂມກຂັນຕິກະນາມ ເປັນສັດສິກາບັນຍັດຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ພ້ອມກັບການບັນລຸພຣະສັບພັນຍຸຕະຍານ ທີ່ເຫງົ້າ ຕົ້ນໂພ ລວມຄວາມວ່າ ພິກຂຸນັ້ນ ຯລຯ ເປັນຜູ້ມີທຳອັນເອກຜຸດຂຶ້ນ ເພື່ອກຳຈັດຄວາມມືດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸເປັນຜູ້ມີສະຕິ ມີຈິດຫຼຸດພົ້ນດ້ວຍດີແລ້ວ
ເພື່ອກຳຈັດຄວາມພໍໃຈໃນທຳເຫຼົ່ານີ້
ພິກຂຸນັ້ນເມື່ອກຳນົດພິຈາລະນາທຳໂດຍຊອບຕາມການ
ເປັນຜູ້ມີທຳເອກຜຸດຂຶ້ນ ເພື່ອກຳຈັດຄວາມມືດ

**ສາຣີປຸດຕະສຸດຕະນິດເທດທີ ໑໖ ຈົບ**

**ນິດເທດແຫ່ງພຣະສູດ ໑໖ ນິດເທດ ໃນອັດຖະກະວັກ ຈົບບໍລິບູນ**

**ມະຫານິດເທດ ຈົບ**